# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໑໙

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໕

## ມັດຊິມະນິກາຍ ມັດຊິມະປັນນາດ



ສະບັບຄົ້ນຄ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໔໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໔ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໓ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໓ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໒໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທ ຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໑໓

# ພຣະສຸດຕັນຕະປິດົກ

## ເຫຼັ້ມທີ ໕

## ມັດຊິມະນິກາຍ ມັດຊິມະປັນນາດ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະອົງນັ້ນ**

# ໑. ຄະຫະປະຕິວັກ

**ໝວດວ່າດ້ວຍຄະຫະບໍດີ**

## ໑. ກັນທະຣະກະສູດ

**ວ່າດ້ວຍປະຣິພາຊົກຊື່ກັນທະຣະກະ**

[໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ໃກ້ສະໂບກຂະຣະນີຊື່ຄັກຄຣາ ເຂດນະຄອນຈໍາປາ ພ້ອມກັບພິກຂຸສົງໝູ່ໃຫຍ່ ຄັ້ງນັ້ນແລ ບຸດຂອງຄວານຊ້າງຊື່ເປດສະ ແລະປະຣິພາຊົກ ຊື່ກັນທະຣະກະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ນາຍເປດສະບຸດຂອງຄວານຊ້າງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ສ່ວນກັນທະຣະກະປະຣິພາຊົກໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນ ໄດ້ຢືນຢູ່ທີ່ທີ່ສົມຄວນ ແລ້ວຫລຽວເບິ່ງ ພິກຂຸສົງຜູ້ນັ່ງນິ່ງງຽບຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

“ຂ້າແດ່ ພຣະໂຄດົມຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຽງທໍ່ນີ້ ທ່ານ ພຣະໂຄດົມກໍຊື່ວ່າແນະນໍາໃຫ້ພິກຂຸສົງປະຕິບັດຊອບແລ້ວ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ແມ່ນພຣະຜູ້

ມີພຣະພາກອະຣະຫັນຕະ ສຳມາສຳພຸດທະເຈົ້າທັງຫລາຍໃນອະດີດຕະການ ກໍຊົງແນະນຳໃຫ້ພິກຂຸສົງປະຕິບັດຊອບເປັນຢ່າງຍິ່ງໄດ້ເຖິງພຽງນີ້ ຄືທ່ານພຣະໂຄດົມຊົງແນະນຳໃຫ້ພິກຂຸສົງປະຕິບັດຊອບຢູ່ໃນບັດນີ້

ຂ້າແດ່ ພຣະໂຄດົມຜູ້ຈະເລີນ ແມ່ນພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າທັງຫລາຍໃນອະນາຄົດຕະການ ກໍຈັກຊົງແນະນຳໃຫ້ພິກຂຸສົງປະຕິບັດຊອບເປັນຢ່າງຍິ່ງໄດ້ເຖິງພຽງນີ້ ຄືທ່ານພຣະໂຄດົມຊົງແນະນຳໃຫ້ພິກຂຸສົງປະຕິບັດຊອບຢູ່ໃນບັດນີ້"

## ມະນຸດມີປາກກັບໃຈບໍ່ກົງກັນ

[໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຂໍ້ນີ້ເປັນແນວນັ້ນ ກັນທະຣະກະ ຂໍ້ນີ້ເປັນ ແນວນັ້ນ ກັນທະຣະກະ ແມ່ນພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າທັງຫລາຍໃນອະດີດຕະການ ກໍຊົງແນະນຳໃຫ້ພິກຂຸສົງປະຕິບັດຊອບເປັນຢ່າງຍິ່ງໄດ້ເຖິງພຽງນີ້ ຄື ເຮົາແນະນຳໃຫ້ພິກຂຸສົງປະຕິບັດຊອບຢູ່ໃນບັດນີ້ ແມ່ນພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າທັງຫລາຍໃນອະນາຄົດຕະການ ກໍຈັກຊົງແນະນຳໃຫ້ພິກຂຸສົງປະຕິບັດຊອບເປັນຢ່າງຍິ່ງໄດ້ເຖິງພຽງນີ້ ຄື ເຮົາແນະນຳໃຫ້ພິກຂຸສົງປະຕິບັດຊອບຢູ່ໃນບັດນີ້

ຈິງຢູ່ ກັນທະຣະກະ ໃນພິກຂຸສົງນີ້ ມີພິກຂຸຈຳນວນຫຼາຍຜູ້ເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງ ອັນໜຶ່ງ ໃນພິກຂຸສົງນີ້ ຍັງມີພິກຂຸອີກຈຳນວນຫຼາຍຜູ້ຍັງເປັນເສຂະບຸກຄົນ ມີປົກກະຕິສະງົບ ມີຄວາມເປັນຢູ່ສະງົບ ມີປັນຍາ ມີຄວາມເປັນຢູ່ດ້ວຍປັນຍາ ທ່ານເຫຼົ່ານັ້ນ ມີຈິດຕັ້ງໝັ້ນດີໃນສະຕິປັດຖານ ໔ ປະການຢູ່

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ(ຄວາມເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ) ແລະ ໂທມະນັດ(ຄວາມທຸກໃຈ) ໃນໂລກໄດ້

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫລາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້

໓. ພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້

໔. ພິຈາລະນາເຫັນທຳໃນທຳທັງຫລາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້”

[໓] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ນາຍເປດສະບຸດຂອງຄວານຊ້າງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

“ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ສະຕິປັດຖານ ໔ ປະການນີ້ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ດີແລ້ວເພື່ອຄວາມບໍລິສຸດຂອງສັດທັງຫລາຍ ເພື່ອກ້າວລ່ວງໂສກະ (ຄວາມໂສກເສົ້າ) ແລະປະຣິເທວະ (ຄວາມໄຫ້ຈົ່ມ) ເພື່ອດັບທຸກ (ຄວາມທຸກກາຍ) ແລະໂທມະນັດ (ຄວາມທຸກໃຈ) ເພື່ອບັນລຸຍາຍະທຳ ເພື່ອເຮັດໃຫ້ແຈ້ງພຣະນິບພານ

ຂ້າແດ່ ພຣະອົງຜູ້ຈະເລີນ ແທ້ຈິງ ແມ່ນຂ້າພຣະອົງທັງຫລາຍເປັນຄະຫຼືຫັດນຸ່ງຫົ່ມຜ້າຂາວ ກໍມີຈິດຕັ້ງໝັ້ນດີໃນສະຕິປັດຖານ ໔ ປະການນີ້ຢູ່ໄດ້ຕາມການທີ່ສົມຄວນ ຂໍປະທານອະໄຣກາດ ຂ້າພຣະອົງທັງຫລາຍພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິຈາລະນາເຫັນເວທະນາໃນເວທະນາທັງຫລາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້

ພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິຈາລະນາເຫັນທຳໃນທຳທັງຫລາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຽງທໍ່ນີ້ ພຣະຜູ້ມີ ພຣະພາກກໍຊື່ວ່າຊົງຮູ້ປະໂຫຍດ ແລະ ສິ່ງທີ່ບໍ່ແມ່ນປະໂຫຍດຂອງສັດທັງຫລາຍ ໃນເມື່ອຄົນຮົກໂລກຄົນເຫຼືອຂໍ ຄົນຂີ້ສໍ້ຍັງມີຢູ່ແນວນີ້ ເປັນຄວາມຈິງທີ່ຄົນສອນຍາກ ສັດລ້ຽງເຝິກງ່າຍ ຍ້ອນຂ້າພຣະອົງສາມາດໃຫ້ຊ້າງທີ່ເຝິກແລ້ວເຮັດຕາມໄດ້ ເຊັ່ນ ໃຫ້ຍ່າງໄປຍ່າງມາໃນລະຫວ່າງນະຄອນຈຳປາກໍໄດ້ ໃຫ້ເຮັດອາການຕ່າງ ໆ ຄື ຍົກຂູຂາໜ້າທັງ ໔ ກີ້ງ ຄູ້ເຂົ່າ ຫຍໍ້ໂຕໄດ້ທຸກແນວ ແຕ່ເຫຼົ່າຊົນ ຄື ຂ້າທາດກໍດີ ຄົນຮັບໃຊ້ກໍດີ ຄົນງານກໍດີຂອງ ຂ້າພຣະອົງເຮັດແນວໜຶ່ງ ເວົ້າແນວໜຶ່ງຄິດອີກແນວໜຶ່ງ ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຽງທໍ່ນີ້ ພຣະຜູ້ມີພຣະພາກເຈົ້າກໍຊື່ວ່າ ຊົງຮູ້ປະໂຫຍດ ແລະ ສິ່ງທີ່ບໍ່ແມ່ນປະໂຫຍດຂອງສັດທັງຫລາຍ ໃນເມື່ອຄົນຮົກໂລກ ຄົນເຫຼືອຂໍ ຄົນຂີ້ສໍ້ຍັງມີຢູ່ແນວນີ້ ເປັນຄວາມຈິງທີ່ຄົນສອນຍາກ ສັດລ້ຽງເຝິກງ່າຍ”

## ບຸກຄົນ ໔ ປະເພດ

[໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຂໍ້ນີ້ເປັນແນວນັ້ນ ເປດສະ ຂໍ້ນີ້ເປັນແນວນັ້ນ ເປດສະ ຄົນສອນຍາກ ສັດລ້ຽງເຝິກງ່າຍ ບຸກຄົນ ໔ ປະເພດນີ້ ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ປະເພດ ໃດແດ່?
ຄື ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ

໒. ເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ

໓. ເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະ ເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ

໔. ເປັນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ

ບຸກຄົນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນນັ້ນ ເປັນຜູ້ບໍ່ຫິວດັບຮ້ອນ ເຢັນໃຈ ມີຕົນອັນປະເສີດ ສະເຫວີຍສຸກຢູ່ໃນປັດຈຸບັນ

ເປດສະ ບັນດາບຸກຄົນ ໔ ປະເພດນີ້ ທ່ານຖືກໃຈບຸກຄົນປະເພດໃດນໍ?"

ນາຍເປດສະບຸດຂອງຄວານຊ້າງຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງ ບໍ່ພໍໃຈບຸກຄົນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ຂ້າພຣະອົງບໍ່ພໍໃຈບຸກຄົນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ຂ້າພຣະອົງບໍ່ພໍໃຈບຸກຄົນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະ ເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ຂ້າພຣະອົງພໍໃຈບຸກຄົນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການ ເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນ ໃຫ້ເດືອດຮ້ອນ (ຍ້ອນ) ບຸກຄົນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນນັ້ນ ເປັນຜູ້ ບໍ່ຫິວ ດັບຮ້ອນ ເຢັນໃຈ ມີຕົນອັນປະເສີດ ສະເຫວີຍສຸກຢູ່ໃນປັດຈຸບັນ"

[໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເປດສະ ຍ້ອນເຫດໃດນໍ ທ່ານຈຶ່ງບໍ່ພໍໃຈ ບຸກຄົນ ໓ ປະເພດນັ້ນ"

ນາຍເປດສະບຸດຂອງຄວານຊ້າງຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນ ຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ຊື່ວ່າເຮັດຕົນເຊິ່ງຮັກສຸກກຽດຊັງທຸກໃຫ້ເດືອດຮ້ອນ ໃຫ້ຮ້ອນຮຸ່ມ ຍ້ອນເຫດນີ້ ຂ້າພຣະອົງຈຶ່ງບໍ່ພໍໃຈບຸກຄົນນີ້ ບຸກຄົນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ຊື່ວ່າເຮັດ ຜູ້ອື່ນເຊິ່ງຮັກສຸກກຽດຊັງທຸກໃຫ້ເດືອດຮ້ອນ ໃຫ້ຮ້ອນຮຸ່ມ ຍ້ອນເຫດນີ້ ຂ້າພຣະອົງຈຶ່ງບໍ່ພໍໃຈບຸກຄົນນີ້ ສ່ວນບຸກຄົນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ຊື່ວ່າ ເຮັດຕົນແລະຜູ້ອື່ນເຊິ່ງຮັກສຸກກຽດຊັງທຸກໃຫ້ເດືອດຮ້ອນ ໃຫ້ຮ້ອນຮຸ່ມ ຍ້ອນເຫດນີ້ ຂ້າພຣະອົງຈຶ່ງບໍ່ພໍໃຈບຸກຄົນນີ້ ບຸກຄົນໃດບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຕົນ ໃຫ້ເດືອດຮ້ອນ ແລະເປັນຜູ້ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ ເດືອດຮ້ອນ ບຸກຄົນນັ້ນຊື່ວ່າບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນຜູ້ບໍ່ຫິວ ດັບຮ້ອນ ເຢັນໃຈ ມີຕົນອັນປະເສີດສະເຫວີຍສຸກຢູ່ໃນປັດຈຸບັນ ຍ້ອນເຫດນີ້ ຂ້າພຣະອົງ ຈຶ່ງພໍໃຈບຸກຄົນນີ້ ຖ້າຈັ່ງຊັ້ນ ບັດນີ້ ຂ້າພຣະອົງຂໍທູນລາກັບ ຍ້ອນມີກິດ ມີໜ້າທີ່ທີ່ຈະຕ້ອງເຮັດອີກຫຼາຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເປດສະ ທ່ານຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

ຈາກນັ້ນ ນາຍເປດສະບຸດຂອງຄວານຊ້າງຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ແລ້ວລຸກຈາກບ່ອນນັ່ງ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈາກໄປ

[໖] ຄັ້ງນັ້ນ ເມື່ອນາຍເປດສະບຸດຂອງຄວານຊ້າງຈາກໄປບໍ່ດົນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫລາຍມາຕັດວ່າ "ພິກຂຸທັງຫລາຍ ນາຍເປດສະບຸດຂອງຄວານຊ້າງເປັນຄົນສະຫລຽວສະຫຼາດ ມີປັນຍາຫຼາຍ ຖ້ານາຍເປດສະບຸດຂອງຄວານຊ້າງຈະເພິ່ງນັ່ງອີກຈັກນ້ອຍພຽງຊົ່ວເວລາທີ່ເຮົາຈຳແນກບຸກຄົນ ໔ ປະເພດນີ້ໂດຍພິດສະດານ ກໍຈັກໄດ້ຮັບປະໂຫຍດອັນໃຫຍ່ຫລວງໆ ແຕ່ເຖິງຈະຟັງໂດຍສັງເຂບພຽງທໍ່ນີ້ ນາຍເປດສະບຸດຂອງຄວານຊ້າງກໍຍັງໄດ້ຮັບປະໂຫຍດອັນໃຫຍ່ຫລວງ"

ພິກຂຸທັງຫລາຍ ຂາບທູນວ່າ "ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ບັດນີ້ເປັນການທີ່ສົມຄວນ ຂ້າແດ່ພຣະສຸຄົດ ບັດນີ້ເປັນການທີ່ສົມຄວນ ທີ່ພຣະຜູ້ມີພຣະພາກເຈົ້າຈະຊົງຈຳແນກບຸກຄົນ ໔ ປະເພດນີ້ໂດຍພິດສະດານ ພິກຂຸທັງຫລາຍ ໄດ້ສະດັບຈາກພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫລາຍ ຖ້າເຊັ່ນນັ້ນ ທ່ານທັງຫລາຍ ຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເລື້ອງນີ້ຂຶ້ນວ່າ

[໗] "ບຸກຄົນເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນອະເຈລະກະ (ປະພຶດເປືອຍກາຍ) ບໍ່ມີມາຣະຍາດ ເລຍມື ເຂົາເຊີນໃຫ້ໄປຮັບອາຫານກໍບໍ່ໄປ ເຂົາເຊີນໃຫ້ຢຸດຮັບອາຫານກໍບໍ່ຢຸດ ບໍ່ຮັບອາຫານທີ່ເຂົາແບ່ງໄວ້ ບໍ່ຮັບອາຫານທີ່ເຂົາເຮັດເຈາະຈົງ ບໍ່ຍິນດີອາຫານທີ່ເຂົາເຊີນ ບໍ່ຮັບອາຫານຈາກ ປາກໝໍ້ ບໍ່ຮັບອາຫານຈາກປາກພາຊະນະ ບໍ່ຮັບອາຫານກວມທໍຣະນີປະຕູ ບໍ່ຮັບອາຫານກວມໄມ້ຄ້ອນບໍ່ຮັບອາຫານກວມສາກ ບໍ່ຮັບອາຫານຂອງຄົນ ໒ ຄົນທີ່ກຳລັງບໍຣິໂພກ ບໍ່ຮັບອາຫານຂອງຍິງມີທ້ອງ ບໍ່ຮັບອາຫານຂອງຍິງຜູ້ກຳລັງໃຫ້ບຸດດື່ມນົມ ບໍ່ຮັບອາຫານ ຂອງຍິງທີ່ກ້ຽວພາຊາຍ ບໍ່ຮັບອາຫານທີ່ນັດແນະກັນເຮັດໄວ້ ບໍ່ຮັບອາຫານໃນບ່ອນລ້ຽງໝາ ບໍ່ຮັບອາຫານໃນບ່ອນມີແມງວັນໄຕ່ຕອມເປັນກຸ່ມ ໆ ບໍ່ກິນປາ ບໍ່ກິນຊີ້ນ ບໍ່ດື່ມສຸຣາ ບໍ່ດື່ມເມໄຣ ບໍ່ດື່ມຢາດອງ ຮັບອາຫານໃນເຮືອນຫລັງດຽວ ເປັນຢູ່ດ້ວຍເຂົ້າຄຳດຽວ ຮັບອາຫານໃນເຮືອນ ໒ ຫລັງ ເປັນຢູ່ດ້ວຍເຂົ້າ ໒ ຄຳ ຯລຯ ຮັບອາຫານໃນເຮືອນ ໗ ຫລັງ ເປັນຢູ່ດ້ວຍເຂົ້າ ໗ ຄຳ ເປັນຢູ່ດ້ວຍອາຫານໃນຖາດນ້ອຍ ໑ ໃບ ເປັນຢູ່ດ້ວຍອາຫານໃນ ຖາດນ້ອຍ ໒ ໃບ ຯລຯ ເປັນຢູ່ດ້ວຍອາຫານໃນຖາດນ້ອຍ ໗ ໃບ ກິນອາຫານທີ່ເກັບໄວ້ ແຮມຄືນ ໑ ມື້ ກິນອາຫານທີ່ເກັບໄວ້ແຮມຄືນ ໒ ມື້ ຯລຯ ກິນອາຫານທີ່ເກັບໄວ້ ແຮມຄືນ ໗ ມື້ ຖືການບໍຣິໂພກອາຫານ ໑໕ ມື້ຕໍ່ ໑ ຄາບຢູ່ ດ້ວຍປະການແນວນີ້ ເຂົາເປັນຜູ້ກິນສົ້ມຜັກເປັນອາຫານ ກິນເຂົ້າຟ່າງເປັນອາຫານ ກິນໝາກເດືອຍເປັນອາຫານ ກິນກາກເຂົ້າເປັນອາຫານ ກິນສາຫຣ່າຍເປັນອາຫານ ກິນຮຳເປັນອາຫານ ກິນເຂົ້າກົ້ນໝໍ້ເປັນອາຫານ ກິນກຳຍານເປັນອາຫານ ກິນຫຍ້າເປັນອາຫານ ກິນມູນງົວເປັນອາຫານ ກິນເຫງົ້າແລະໝາກໄມ້ປ່າເປັນອາຫານ ບໍຣິໂພກໝາກໄມ້ຫລົ່ນເປັນຢູ່ ເຂົານຸ່ງຫົ່ມຜ້າປ່ານ ນຸ່ງຫົ່ມຜ້າແກມກັນ ນຸ່ງຫົ່ມຜ້າຫໍ່ສົບ ນຸ່ງຫົ່ມຜ້າບັງສຸກຸນ ນຸ່ງຫົ່ມຜ້າເປືອກໄມ້ ນຸ່ງຫົ່ມໜັງເສືອ ນຸ່ງຫົ່ມໜັງເສືອມີເລັບ ນຸ່ງຫົ່ມຜ້າຄາກອງ ນຸ່ງຫົ່ມຜ້າເປືອກປໍກອງ ນຸ່ງຫົ່ມຜ້າໝາກກອງ ນຸ່ງຫົ່ມຜ້າ ກຳພົນຜົມມະນຸດ ນຸ່ງຫົ່ມຜ້າກຳພົນຂົນສັດ ນຸ່ງຫົ່ມຜ້າຂົນປີກນົກເຄົ້າ ລົກຜົມແລະໜວດ ຄືຖືການລົກຜົມແລະໜວດ ຢືນແນວດຽວບໍ່ຍອມນັ່ງ ຍ່າງແຢ່ງແຢ້ ຄືຖືການຍ່າງ ຢ່ອງຢໍ້(ຢຽບພື້ນບໍ່ເຕັມຕີນ) ນອນເທິງໜາມ ຄືຖືການນອນເທິງໜາມ ອາບນ້ຳ ມື້ລະ ໓ ຄັ້ງ ຄື ຖືການລົງອາບນ້ຳ໑ ຖືການກ້າວແລະອົບກາຍຫຼາຍຮູບແບບຢູ່ ດ້ວຍປະການແນວນີ້

ພິກຂຸທັງຫລາຍ ບຸກຄົນນີ້ຮຽກວ່າ ເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ

[໗] ບຸກຄົນເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ຂ້າແບ້ ຂ້າໝູ ຂ້ານົກ ຂ້າເນື້ອ(ລ້ຽງຊີບ) ເປັນຄົນໂຫດຫ້ຽມ ເປັນຄົນຂ້າປາ ເປັນໂຈນ ເປັນຄົນຂ້າໂຈນ ເປັນຄົນຂ້າງົວ ເປັນຄົນຄຸມຄຸກ ຫຼືລາງພວກເປັນຜູ້ທຳການທາລຸນ

ພິກຂຸທັງຫລາຍ ບຸກຄົນນີ້ຮຽກວ່າ ເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ

[໘] ບຸກຄົນເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ເປັນພຣະຣາຊາມະຫາກະສັດຜູ້ໄດ້ຮັບມຸດທາພິເສກແລ້ວກໍດີ ເປັນພາມມະນະມະຫາສານກໍດີ ພຣະຣາຊານັ້ນໂຜດໃຫ້ສ້າງໂຮງບູຊາຍັນຫລັງໃໝ່ ທາງດ້ານທິດຕາເວັນອອກແຫ່ງພຣະນະຄອນ ປົງພຣະເກສາແລະພຣະມັດສຸ ຊົງນຸ່ງຫົ່ມໜັງເສືອມີເລັບ ຊົງທາພຣະວໍຣະກາຍດ້ວຍເນີຍໃສແລະນ້ຳມັນ ຊົງເກົາພຣະປຣິດສະດາງດ້ວຍເຂົາສັດ ເຂົ້າໄປສູ່ໂຮງບູຊາຍັນຫລັງໃໝ່ພ້ອມດ້ວຍພຣະມະເຫສີ ແລະ ພາມປະໂລຫິດ ບັນທົມເທິງພື້ນຫຍ້າ ຂຽວຂະຈີ ບໍ່ໄດ້ລາດດ້ວຍເຄື່ອງປູລາດ ດຳລົງພະຊົນຢູ່ດ້ວຍນ້ຳນົມເຕົ້າທີ່ ໑ ແຫ່ງງົວ ແມ່ລູກອ່ອນທີ່ມີຢູ່ໂຕດຽວ ພຣະມະເຫສີດຳລົງພະຊົນຢູ່ດ້ວຍນ້ຳນົມເຕົ້າທີ່ ໒ ພາມປະໂລຫິດດຳລົງຊີວິດຢູ່ດ້ວຍນ້ຳນົມເຕົ້າທີ່ ໓ ຊົງບູຊາໄຟດ້ວຍນ້ຳນົມເຕົ້າທີ່ ໔ ງົວນ້ອຍມີ ຊີວິດຢູ່ດ້ວຍນ້ຳນົມທີ່ເຫຼືອ ພຣະຣາຊາຮັບສັ່ງແນວນີ້ວ່າ “ຈົ່ງຂ້າງົວເຖິກປະມານທໍ່ນີ້ ບູຊາຍັນ ຈົ່ງຂ້າງົວນ້ອຍໂຕຜູ້ປະມານທໍ່ນີ້ບູຊາຍັນ ຈົ່ງຂ້າງົວນ້ອຍໂຕເມຍປະມານທໍ່ນີ້ ບູຊາຍັນ ຈົ່ງຂ້າແບ້ປະມານທໍ່ນີ້ບູຊາຍັນ ຈົ່ງຂ້າແກະປະມານທໍ່ນີ້ບູຊາຍັນ (ຈົ່ງຂ້າມ້າປະມານທໍ່ນີ້ບູຊາຍັນ) ຈົ່ງຕັດຕົ້ນໄມ້ປະມານທໍ່ນີ້ເພື່ອເຮັດເສົາບູຊາຍັນ ຈົ່ງກ່ຽວຫຍ້າປະມານທໍ່ນີ້ເພື່ອປູພື້ນ” ເຫຼົ່າຊົນຜູ້ເປັນຂ້າທາດກໍດີ ເປັນຄົນຮັບໃຊ້ກໍດີ ເປັນຄົນງານກໍດີ ຂອງພຣະຣາຊານັ້ນ ຖືກອາດຍາຄຸກຄາມ ຖືກໄພຄຸກຄາມ ມີນ້ຳຕານອງໜ້າຮ້ອງໄຫ້ໄປ ທຳງານໄປ

ພິກຂຸທັງຫລາຍ ບຸກຄົນນີ້ຮຽກວ່າ ເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະ ເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ

## ພຣະພຸດທະຄຸນ

[໑໐] ບຸກຄົນເປັນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະ ເປັນຜູ້ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນ ໃຫ້ເດືອດຮ້ອນ ເຂົາບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນຜູ້ບໍ່ຫິວ ດັບຮ້ອນ ເຢັນໃຈ ມີຕົນອັນປະເສີດ ສະເຫວີຍສຸກຢູ່ໃນປັດຈຸບັນ ເປັນແນວໃດ?

ຄື ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍຕົນເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ໘ ໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງ ປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫລາຍ ເປັນພຣະພຸດທະເຈົ້າ ເປັນພຣະ ຜູ້ມີພຣະພາກ໑ ຕະຖາຄົດຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດ ພ້ອມທັງສະມະນະພາມ ເທວະດາແລະມະນຸດ ດ້ວຍຕົນເອງແລ້ວປະກາດໃຫ້ຜູ້ອື່ນຮູ້ຕາມ ສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ປະກາດພົມມະຈັນ ພ້ອມທັງອັດຖະແລະພະຍັນຊະນະບໍລິສຸດ ບໍລິບູນຄົບຖ້ວນຄະຫະບໍດີ ບຸດຄະຫະບໍດີ ຫຼືອະນຸຊົນ (ຄົນຜູ້ເກີດພາຍຫລັງ) ໃນຕະກູນໃດຕະກູນໜຶ່ງ ໄດ້ສະດັບທຳ ນັ້ນແລ້ວ ເກີດສັດທາໃນຕະຖາຄົດ ເມື່ອມີສັດທາຍ່ອມຄິດວ່າ "ການຢູ່ຄອງເຮືອນເປັນເລື້ອງອຶດອັດ ເປັນທາງມາແຫ່ງທຸລີ ການບວດເປັນທາງປອດໂປ່ງ ການທີ່ຜູ້ຄອງເຮືອນຈະ ປະພຶດພົມມະຈັນໃຫ້ບໍລິສຸດ ບໍລິບູນຄົບຖ້ວນຄືຫອຍສັງຂັດບໍ່ແມ່ນເຮັດໄດ້ງ່າຍ ທາງທີ່ດີ ເຮົາຄວນແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ" ຕໍ່ມາ ເຂົາລະຖິ້ມກອງໂພຄະສົມບັດນ້ອຍໃຫຍ່ ແລະ ເຄືອຍາດນ້ອຍໃຫຍ່ ແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ

## ສິກຂາແລະສາຊີບຂອງພິກຂຸ

[໑໑] ເຂົາເມື່ອບວດແລ້ວແນວນີ້ ເປັນຜູ້ເຖິງພ້ອມດ້ວຍສິກຂາ ແລະ ສາຊີບຂອງພິກຂຸທັງຫລາຍ ຄື

໑. ລະ ເວັ້ນຂາດຈາກການຂ້າສັດ ວາງທັນດາວຸດແລະສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງຫວັງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່

໒. ລະ ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຮັບເອົາແຕ່ຂອງທີ່ເຂົາໃຫ້ ມຸ້ງຫວັງແຕ່ຂອງທີ່ເຂົາໃຫ້ ບໍ່ເປັນຂີ້ລັກ ເປັນຄົນສະອາດຢູ່

໓. ລະ ພຶດຕິກຳອັນເປັນຂ້າເສິກຕໍ່ພົມມະຈັນ ປະພຶດພົມມະຈັນ໑ ເວັ້ນຫ່າງໄກຈາກເມຖຸນທຳ໒ ອັນເປັນກິດຂອງຊາວບ້ານ

໔. ລະ ເວັ້ນຂາດຈາກການເວົ້າຕົວະ ຄື ເວົ້າແຕ່ຄຳສັດ ດຳລົງຄວາມສັດ ມີຄຳ

ເວົ້າເປັນຫລັກເຊື່ອຖືໄດ້ ບໍ່ຫລອກລວງຊາວໂລກ

໕. ລະ ເວັ້ນຂາດຈາກການເວົ້າສັບສໍ່ ຄື ຟັງຄວາມຈາກຝ່າຍນີ້ແລ້ວບໍ່ໄປບອກຝ່າຍນັ້ນເພື່ອທຳລາຍຝ່າຍນີ້ ຫຼືຟັງຄວາມຈາກຝ່າຍນັ້ນແລ້ວບໍ່ມາ ບອກຝ່າຍນີ້ເພື່ອທຳລາຍຝ່າຍນັ້ນ ສະມານຄົນທີ່ແຕກກັນ ສົ່ງເສີມຄົນທີ່ ປອງດອງກັນ ຊົມຊື່ນຍິນດີ ເພີດເພີນຕໍ່ຜູ້ທີ່ສາມັກຄີກັນ ເວົ້າແຕ່ຄຳເວົ້າ ທີ່ສ້າງສັນຄວາມສາມັກຄີ

໖. ລະ ເວັ້ນຂາດຈາກການເວົ້າຄຳຫຍາບ ຄື ເວົ້າແຕ່ຄຳບໍ່ມີໂທດ ມ່ວນ ໜ້າຮັກຈັບໃຈ ເປັນຄຳຂອງຊາວເມືອງ ຄົນສ່ວນຫຼາຍຮັກແພງພໍໃຈ

໗. ລະ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ຄື ເວົ້າຖືກເວລາ ເວົ້າຄຳຈິງ ເວົ້າອີງປະໂຫຍດ ເວົ້າອີງທຳ ເວົ້າອີງວິໄນ ເວົ້າຄຳທີ່ມີຫລັກຖານ ມີທີ່ອ້າງອີງ ມີທີ່ກຳນົດ ປະກອບດ້ວຍປະໂຫຍດ ເໝາະແກ່ເວລາ

໘. ເວັ້ນຂາດຈາກການພາກພີຊະຄາມ໑ ແລະພູຕະຄາມ໒

໙. ສັນຄາບດຽວ ບໍ່ສັນຕອນກາງຄືນ ເວັ້ນຂາດຈາກການສັນໃນເວລາວິການລ

໑໐. ເວັ້ນຂາດຈາກການຟ້ອນລຳ ຂັບຮ້ອງ ເສບດົນຕີ ແລະເບິ່ງການລະຫລິ້ນທີ່ເປັນຂ້າເສິກແກ່ກຸສົນ

໑໑. ເວັ້ນຂາດຈາກການທັດຊົງ ປະດັບ ຕົກແຕ່ງຮ່າງກາຍດ້ວຍພວງດອກໄມ້ ຂອງຫອມແລະເຄື່ອງຕົກແຕ່ງຜິວ ອັນເປັນລັກສະນະແຫ່ງການແຕ່ງໂຕ

໑໒. ເວັ້ນຂາດຈາກທີ່ນອນສູງໃຫຍ່

໑໓. ເວັ້ນຂາດຈາກການຄຳແລະເງິນ

໑໔. ເວັ້ນຂາດຈາກການຮັບທັນຍາຫານດິບ໔

໑໕. ເວັ້ນຂາດຈາກການຮັບຊີ້ນດິບ

໑໖. ເວັ້ນຂາດຈາກການຮັບສະຕີແລະກຸມາຣີ

໑໗. ເວັ້ນຂາດຈາກການຮັບຂ້າທາດຍິງແລະຂ້າທາດຊາຍ

໑໘. ເວັ້ນຂາດຈາກການຮັບແບ້ແລະແກະ

໑໙. ເວັ້ນຂາດຈາກການຮັບໄກ່ແລະໝູ

໒໐. ເວັ້ນຂາດຈາກການຮັບຊ້າງ ງົວ ມ້າ ແລະລາ

໒໑. ເວັ້ນຂາດຈາກການຮັບຮົ້ວສວນ ໄຮ່ ນາແລະທີ່ດິນ

໒໒. ເວັ້ນຂາດຈາກການເຮັດໜ້າທີ່ເປັນໂຕແທນແລະຜູ້ສື່ສານ

໒໓. ເວັ້ນຂາດຈາກການຊື້ການຂາຍ

໒໔. ເວັ້ນຂາດຈາກການໂກງດ້ວຍຕາຊິງ ດ້ວຍຂອງປອມ ແລະດ້ວຍເຄື່ອງຕວງວັດ

໒໕. ເວັ້ນຂາດຈາກການຮັບສິນບົນ ການລໍ້ລວງ ແລະການຫລອກລວງ

໔໕. ເວັ້ນຂາດຈາກການຕັດ(ອະໄວຍະວະ) ການຂ້າ ການຄຸມຂັງ ການແລ່ນຕີຍາດ ຊີງ ການປຸ້ນ ແລະການຂົ່ມຂູ່ເອົາຊັບ

ພິກຂຸນັ້ນເປັນຜູ້ສັນໂດດດ້ວຍຈີວອນພໍຄຸ້ມຮ່າງກາຍແລະບິນທະບາດພໍອີ່ມທ້ອງ ຈະໄປໃນທີ່ໃດ ໆ ກໍໄປໄດ້ທັນທີ ນົກບິນໄປ ໃນທີ່ໃດ ໆ ກໍມີແຕ່ປີກເປັນພາລະ ແມ່ນສັນໃດ ພິກຂຸ ກໍສັນນັ້ນຄືກັນ ເປັນຜູ້ສັນໂດດດ້ວຍຈີວອນພໍຄຸ້ມຮ່າງກາຍແລະບິນທະບາດພໍອີ່ມທ້ອງ ຈະໄປ ໃນທີ່ໃດ ໆ ກໍໄປໄດ້ທັນທີ ພິກຂຸນັ້ນປະກອບດ້ວຍອະຣິຍະສີລຂັນນີ້ແລ້ວ ຍ່ອມສະເຫວີຍສຸກອັນປາສະຈາກໂທດໃນພາຍໃນ

## ການສັງລວມອິນຊີ

[໑໔] ພິກຂຸນັ້ ນເຫັນຮູບທາງຕາແລ້ວບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອ ສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາ ແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ

ຟັງສຽງທາງຫູ ຯລຯ
ດົມກິ່ນທາງດັງ ຯລຯ
ຊີມຣົດທາງລີ້ນ ຯລຯ
ຖືກຕ້ອງໂຜດຖັບພະທາງກາຍ ຯລຯ

ຮູ້ທຳມາຣົມທາງໃຈແລ້ວບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ພິກຂຸຜູ້ປະກອບດ້ວຍຄວາມສັງລວມ ອະຣິຍະອິນຊີສັງວອນນີ້ ຍ່ອມສະເຫວີຍສຸກອັນບໍ່ຜະສົມກັບກິເລດໃນພາຍໃນ

ພິກຂຸນັ້ນທຳຄວາມຮູ້ສຶກໂຕໃນການກ້າວໄປ ການຖອຍກັບ ການແລເບິ່ງ ການຫລຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດແລະຈີວອນ ການສັນ ການດື່ມ ການຫຍໍ້າ ການຊີມ ການຖ່າຍອຸດຈາຣະປັດສາວະ ການຍ່າງ ການຢືນ ການນັ່ງ ການນອນ ການຕື່ນ ການເວົ້າ ການນິ່ງ

## ການລະນິວອນ

[໑໕] ພິກຂຸນັ້ນປະກອບດ້ວຍອະຣິຍະສີລຂັນ ອະຣິຍະອິນຊີສັງວອນ ແລະ ອະຣິຍະສະຕິສຳປະຊັນຍະນີ້ແລ້ວພັກຢູ່ທີ່ເສນາສະນະງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ຊອກເຂົາ ຖໍ້າ ປ່າຊ້າ ປ່າຊັດ ກາງແຈ້ງ ລອມຟາງ ທ່ານກັບຈາກບິນທະບາດພາຍຫລັງສັນພັດຕາຫານສຳ ເລັດແລ້ວນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິສະເພາະໜ້າ ທ່ານລະອະພິດຊາ (ຄວາມເພ່ງເລັງຍາກໄດ້

ສິ່ງຂອງຂອງຜູ້ອື່ນ) ໃນໂລກ ມີໃຈປາສະຈາກອະພິດຊາຢູ່ ຊໍາຣະຈິດໃຫ້ບໍລິສຸດ ຈາກອະພິດຊາ ລະພະຍາບາດແລະຄວາມມຸ້ງຮ້າຍ ມີຈິດບໍ່ພະຍາບາດ ມຸ້ງປະໂຫຍດເກື້ອກູນສັບພະສັດຢູ່ ຊໍາຣະ ຈິດໃຫ້ບໍລິສຸດຈາກພະຍາບາດ ແລະຄວາມມຸ້ງຮ້າຍ ລະຖີນະມິດທະ (ຄວາມ ຫົດຫູ່ແລະງ່ວມ ເຫງົາ) ປາສະຈາກຖີນະມິດທະ ກໍານົດແສງສະຫວ່າງ ມີສະຕິສໍາປະຊັນຍະຢູ່ ຊໍາຣະ ຈິດໃຫ້ ບໍລິສຸດຈາກຖີນະມິດທະ ລະອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະຄວາມລໍາຄານໃຈ) ເປັນ ຜູ້ບໍ່ຟຸ້ງຊ່ານ ມີຈິດສະງົບຢູ່ພາຍໃນ ຊໍາຣະຈິດໃຫ້ບໍລິສຸດຈາກອຸດທັດຈະກຸກກຸດຈະ ລະວິຈິກິດສາ (ຄວາມລັງເລສົງໄສ) ຂ້າມວິຈິກິດສາໄດ້ແລ້ວ ບໍ່ມີວິຈິກິດສາໃນກຸສົນທໍາຢູ່ ຊໍາຣະຈິດໃຫ້ບໍລິສຸດ ຈາກວິຈິກິດສາ

## ຊານ ໔

ພິກຂຸນັ້ນລະນິວອນ ໕ ປະການນີ້ ທີ່ເປັນເຄື່ອງເສົ້າໝອງແຫ່ງຈິດ ເປັນເຄື່ອງທອນກໍາ ລັງປັນຍາແລ້ວ ສະຫງັດຈາກກາມແລະອະກຸສົນທໍາທັງຫລາຍແລ້ວ ບັນລຸປະຖົມຊານ ທີ່ມີວິຕົກ ວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່

ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີ ພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່

ຍ້ອນປີຕິຈາງຄາຍອອກ ມີອຸເປກຂາ ມີສະຕິສໍາປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫລາຍສັນເສີນວ່າ “ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ”

ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນ ບັນລຸຈະຕຸດຖະ ຊານທີ່ບໍ່ມີທຸກແລະບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່

## ວິດຊາ ໓

[໑໔] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ໑ ປາສະຈາກຄວາມ ເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນ ນ້ອມຈິດໄປ ເພື່ອປຸບເພນິວາສານຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບເປັນ ຈໍານວນຫລາຍແດ່ ຕະຫຼອດວິວັດຕະກັບເປັນອັນຫຼາຍແດ່ ຕະຫຼອດສັງວັດຕະກັບແລະວິວັດຕະ ກັບເປັນຈໍານວນຫລາຍແດ່ວ່າ “ໃນພົບນັ້ນ ເຮົາມີ ຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ

ເຮົາກໍ່ມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນຈຶ່ງມາເກີດໃນພົບນີ້" ທ່ານຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດແນວນີ້

[໑໘] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ພວກເຂົາຫລັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ໑ ແຕ່ໝູ່ສັດທີ່ປະກອບກາຍສຸດຈະຣິດ ວະຈີສຸຈະຣິດ ແລະມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກ ພວກເຂົາຫລັງຈາກຕາຍແລ້ວ ຈະໄປເກີດໃນສຸຄະຕິໂລກສະຫວັນ ທ່ານເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີ ແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແນວນີ້ແລ

[໑໙] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣດ ນີ້ທຸກຂະນິໂຣດຄາມີນີປະຕິປະທາ ນີ້ອາສະວະ໔ ນີ້ອາສະວະສະມຸໄທ ນີ້ອາສະວະນິໂຣດ ນີ້ອາສະວະນິໂຣດຄາມີນີປະຕິປະທາ" ເມື່ອທ່ານຮູ້ເຫັນຢູ່ແນວນີ້ ຈິດຍ່ອມລຸດພົ້ນຈາກກາມາສະຫວະ ພະວາດະວະ ແລະ ອະວິດຊາສະຫວະ ເມື່ອຈິດລຸດພົ້ນແລ້ວກໍ່ຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ "ຊາດ ສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ພິກຂຸທັງຫລາຍ ບຸກຄົນນີ້ຮຽກວ່າ ເປັນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບ ໃນການເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເຂົາບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ຈຶ່ງເປັນຜູ້ບໍ່ຫິວ ດັບຮ້ອນ ເຢັນໃຈ ມີຕົນອັນປະເສີດສະເຫວີຍສຸກຢູ່ໃນປັດຈຸບັນ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ກັນທະຣະກະສູດທີ ໑ ຈົບ**

# ໘. ອັດຖະກະນາຄະຣະສູດ

## ວ່າດ້ວຍທຳມະເທດສະໜາທີ່ອັດຖະກະນະຄອນ

[໑໗] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ທ່ານພຣະອານົນຢູ່ທີ່ເວລຸວະຄາມ ເຂດນະຄອນເວສາລີ ສະໄໝນັ້ນແລ ຄະຫະບໍດີຊາວອັດຖະກະນະຄອນຊື່ທະສະມະ ໄດ້ເດີນທາງໄປເຖິງເມືອງປາຕະລີບຸດດ້ວຍກິດທີ່ຕ້ອງເຮັດ ບາງຢ່າງ ຄັ້ງນັ້ນແລ ທະສະມະຄະຫະບໍດີຊາວອັດຖະກະນະຄອນໄດ້ເຂົ້າໄປພົບພິກຂຸຮູບໜຶ່ງທີ່ກຸກກຸຕາຣາມະ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມພິກຂຸນັ້ນວ່າ "ທ່ານຂ້ານ້ອຍ ບັດນີ້ ທ່ານພຣະອານົນ ຢູ່ທີ່ໃດ ຂ້າພະເຈົ້າຕ້ອງການຈະພົບທ່ານ"

ພິກຂຸນັ້ນຕອບວ່າ "ຄະຫະບໍດີ ທ່ານພຣະອານົນນີ້ຢູ່ທີ່ເວລຸວະຄາມ ເຂດນະຄອນເວສາລີ" ຄັ້ງນັ້ນ ທະສະມະຄະຫະບໍດີຊາວອັດຖະກະນະຄອນເຮັດກິດທີ່ຄວນເຮັດໃນເມືອງປາຕະລີບຸດສຳເລັດແລ້ວ ໄດ້ເຂົ້າໄປພົບທ່ານພຣະອານົນເຖິງເວລຸວະຄາມ ເຂດນະຄອນເວສາລີ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານພຣະອານົນ ວ່າ

[໑໘] "ທ່ານອານົນ ທຳອັນເປັນເອກເຊິ່ງເປັນທີ່ລຸດພົ້ນແຫ່ງຈິດທີ່ຍັງບໍ່ລຸດພົ້ນ ເປັນທີ່ເຖິງຄວາມສິ້ນໄປແຫ່ງອາສະວະທັງຫລາຍທີ່ຍັງບໍ່ສິ້ນໄປ ແລະ ເປັນທີ່ບັນລຸທຳເປັນແດນກະເສມຈາກໂຍຄະອັນປະເສີດ ທີ່ຍັງບໍ່ບັນລຸໂດຍລຳດັບຂອງພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະ ອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດໄວ້ຖືກຕ້ອງແລ້ວ ມີຢູ່ບໍນໍ"

ທ່ານພຣະອານົນຕອບວ່າ "ຄະຫະບໍດີ ທຳອັນເປັນເອກເຊິ່ງເປັນທີ່ລຸດພົ້ນແຫ່ງຈິດ ທີ່ຍັງບໍ່ລຸດພົ້ນ ເປັນທີ່ເຖິງຄວາມສິ້ນໄປແຫ່ງອາສະວະທັງຫລາຍທີ່ຍັງບໍ່ສິ້ນໄປ ແລະເປັນທີ່ບັນລຸທຳເປັນແດນກະເສມຈາກໂຍຄະອັນປະເສີດ ທີ່ຍັງບໍ່ບັນລຸໂດຍລຳດັບຂອງພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດໄວ້ຖືກຕ້ອງແລ້ວ ມີຢູ່"

ທະສະມະຄະຫະບໍດີຖາມວ່າ "ທ່ານອານົນ ທຳອັນເປັນເອກເຊິ່ງເປັນທີ່ລຸດພົ້ນແຫ່ງຈິດທີ່ຍັງບໍ່ລຸດພົ້ນ ເປັນທີ່ເຖິງຄວາມສິ້ນໄປແຫ່ງອາສະວະທັງຫລາຍທີ່ຍັງບໍ່ສິ້ນໄປ ແລະເປັນທີ່ບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດ ທີ່ຍັງບໍ່ບັນລຸໂດຍລຳດັບຂອງພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດໄວ້ຖືກຕ້ອງແລ້ວ ເປັນແນວໃດ?"

## ຮູບຊານ ໘

[໑໗] ທ່ານພຣະອານົນຕອບວ່າ "ຄະຫະບໍດີ ພິກຂຸໃນພຣະທຳວິໄນນີ້ ສະຫງັດຈາກກາມ ແລະອະກຸສົນທຳທັງຫລາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກ ວິເວກຢູ່ ພິກຂຸນັ້ນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ "ແມ່ນແຕ່ປະຖົມຊານ ນີ້ ກໍຖືກປຸງແຕ່ງແລ້ວ ສິ່ງໃດສິ່ງໜຶ່ງທີ່ຖືກປຸງແຕ່ງແລ້ວ ສິ່ງນັ້ນບໍ່ທ່ຽງ ມີຄວາມດັບໄປເປັນທຳມະດາ" ພິກຂຸນັ້ນດຳລົງຢູ່ ໃນທຳ໑ນັ້ນແລ້ວ ຍ່ອມເຖິງຄວາມສິ້ນໄປແຫ່ງອາສະວະທັງຫລາຍ ຫາກຍັງບໍ່ເຖິງຄວາມສິ້ນໄປ ແຫ່ງອາສະວະທັງຫລາຍ ກໍຈະເປັນໂອປະປາຕິກະ ຍ້ອນໂອຣຳພາຄິຍະສັງໂຍດ (ສັງໂຍດເບື້ອງ ຕ່ຳ) ໕ ປະການສິ້ນໄປ ດ້ວຍຄວາມຍິນດີເພີດເພີນໃນທຳນັ້ນ ໆ ຈັກປະຣິນິບພານ ໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ

ຄະຫະບໍດີ ທຳອັນເປັນເອກແມ່ນນີ້ແລ ເຊິ່ງເປັນທີ່ລຸດພົ້ນແຫ່ງຈິດທີ່ຍັງບໍ່ລຸດພົ້ນ ເປັນທີ່ ເຖິງຄວາມສິ້ນໄປແຫ່ງອາສະວະທັງຫລາຍທີ່ຍັງບໍ່ສິ້ນໄປ ແລະ ເປັນທີ່ບັນລຸທຳເປັນແດນກະເສມ ຈາກໂຍຄະອັນປະເສີດ ທີ່ຍັງບໍ່ບັນລຸໂດຍລຳດັບຂອງພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍ ແລະໃຈຢູ່ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາ ສຳພຸດທະເຈົ້າ ຕັດໄວ້ຖືກຕ້ອງແລ້ວ (໑)

[໘໐] ຄະຫະບໍດີ ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸ ທຸຕິຍະ ຊານ ฯລฯ ຢູ່ ພິກຂຸນັ້ນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ "ແມ່ນແຕ່ທຸຕິຍະຊານນີ້ແລ ກໍຖືກປຸງ ແຕ່ງແລ້ວ ฯລฯ ແລະ ເປັນທີ່ບັນລຸທຳເປັນແດນກະເສມຈາກໂຍຄະອັນປະເສີດ ທີ່ຍັງບໍ່ບັນລຸ ໂດຍລຳດັບ" (໒)

ອີກປະການໜຶ່ງ ຍ້ອນປີຕິຈາງຄາຍອອກ ພິກຂຸບັນລຸຕະຕິຍະຊານ ฯລฯ ຢູ່ ພິກຂຸນັ້ນ ຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ "ແມ່ນແຕ່ຕະຕິຍະຊານນີ້ ກໍຖືກປຸງແຕ່ງແລ້ວ ฯລฯ ແລະເປັນທີ່ ບັນລຸທຳເປັນແດນກະເສມຈາກໂຍຄະອັນປະເສີດ ທີ່ຍັງບໍ່ບັນລຸໂດຍລຳດັບ (໓)

ອີກປະການໜຶ່ງ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນ ພິກຂຸບັນລຸຈະຕຸດຖະຊານ ฯລฯ ຢູ່ ພິກຂຸນັ້ນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ "ແມ່ນແຕ່ ຈະຕຸດ ຖະຊານນີ້ ກໍຖືກປຸງແຕ່ງແລ້ວ ฯລฯ ແລະເປັນທີ່ບັນລຸທຳເປັນແດນກະເສມຈາກ ໂຍຄະອັນປະ ເສີດ ທີ່ຍັງບໍ່ບັນລຸໂດຍລຳດັບ (໔)

## ອັບປະມັນຍາ ໔

ອີກປະການໜຶ່ງ ພິກຂຸມີ ເມດຕາຈິດ ແຜ່ໄປຕະຫຼອດທິດທີ່ ໑ ຢູ່ ທິດທີ ໒ ฯລฯ ທິດທີ

໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວ ທຸກໝູ່ເຫຼົ່າໃນບ່ອນທຸກສະຖານ ດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ພິກຂຸນັ້ນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ "ແມ່ນເມດຕາເຈໂຕວິມຸດຕິນີ້ ກໍຖືກປຸງແຕ່ງແລ້ວ ກໍສິ່ງໃດສິ່ງໜຶ່ງທີ່ຖືກປຸງແຕ່ງແລ້ວ ສິ່ງນັ້ນບໍ່ທ່ຽງ ມີຄວາມດັບໄປເປັນທຳມະດາ" ພິກຂຸນັ້ນດຳລົງຢູ່ໃນທຳນັ້ນແລ້ວ ຯລຯ ແລະເປັນທີ່ບັນລຸທຳເປັນແດນກະເສມຈາກໂຍຄະອັນປະເສີດ ທີ່ຍັງບໍ່ບັນລຸໂດຍລຳດັບ (໕)

ອີກປະການໜຶ່ງ ພິກຂຸມີ ກະລຸນາຈິດ ຯລຯ

ອີກປະການໜຶ່ງ ພິກຂຸມີ ມຸທິຕາຈິດ ຯລຯ

ອີກປະການໜຶ່ງ ພິກຂຸມີ ອຸເປກຂາຈິດ ແຜ່ໄປຕະຫຼອດທິດທີ່ ໑ ຢູ່ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນບ່ອນທຸກສະຖານ ດ້ວຍອຸເປກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ພິກຂຸນັ້ນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ "ແມ່ນອຸເປກຂາເຈໂຕວິມຸດຕິນີ້ກໍຖືກປຸງແຕ່ງແລ້ວ ກໍສິ່ງໃດສິ່ງໜຶ່ງທີ່ຖືກປຸງແຕ່ງແລ້ວ ສິ່ງນັ້ນບໍ່ທ່ຽງ ມີຄວາມດັບໄປເປັນທຳມະດາ" ພິກຂຸນັ້ນດຳລົງຢູ່ໃນທຳນັ້ນແລ້ວ ຯລຯ ແລະເປັນທີ່ບັນລຸທຳເປັນແດນກະເສມຈາກໂຍຄະອັນປະເສີດ ທີ່ຍັງບໍ່ບັນລຸໂດຍລຳດັບ (໖-໗-໘)

## ອະຮູບປະຊານ ໓

ອີກປະການໜຶ່ງ ພິກຂຸບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ "ອາກາດ ຫາບ່ອນສຸດບໍ່ໄດ້" ຢູ່ ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາ ໂດຍປະການທັງປວງ ພິກຂຸນັ້ນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ "ແມ່ນອາກາສານັນຈາຍະຕະນະຊານ ນີ້ແລກໍຖືກປຸງແຕ່ງແລ້ວ ສິ່ງໃດສິ່ງໜຶ່ງທີ່ຖືກປຸງແຕ່ງແລ້ວ ສິ່ງນັ້ນບໍ່ທ່ຽງ ມີຄວາມດັບໄປເປັນທຳມະດາ" ພິກຂຸນັ້ນດຳລົງຢູ່ໃນທຳນັ້ນແລ້ວ ຯລຯ ແລະເປັນທີ່ບັນລຸທຳເປັນແດນກະເສມຈາກໂຍຄະອັນປະເສີດ ທີ່ຍັງບໍ່ບັນລຸໂດຍລຳດັບ (໙)

ອີກປະການໜຶ່ງ ພິກຂຸລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ພິກຂຸນັ້ນຍ່ອມ ເຫັນປະຈັກແຈ້ງດັ່ງນີ້ວ່າ "ແມ່ນວິນຍານັນຈາຍະຕະນະຊານນີ້ ກໍຖືກປຸງແຕ່ງແລ້ວ ສິ່ງໃດສິ່ງໜຶ່ງທີ່ຖືກປຸງແຕ່ງແລ້ວ ສິ່ງນັ້ນບໍ່ທ່ຽງ ມີຄວາມດັບໄປເປັນທຳມະດາ" ພິກຂຸນັ້ນດຳລົງຢູ່ໃນທຳນັ້ນແລ້ວ ຯລຯ ແລະ ເປັນທີ່ບັນລຸທຳເປັນແດນກະເສມຈາກໂຍຄະອັນປະເສີດ ທີ່ຍັງບໍ່ບັນລຸໂດຍລຳດັບ (໑໐)

ອີກປະການໜຶ່ງ ພິກຂຸລ່ວງວິນຍານັນ ຈາຍະຕະນະຊານໂດຍປະການທັງປວງ ບັນລຸ

ອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ "ບໍ່ມີອັນໃດ" ພິກຂຸນັ້ນ ຍ່ອມເຫັນປະຈັກແຈ້ງ ດັ່ງນີ້ວ່າ "ແມ່ນອາກິນຈັນຍາຍະຕະນະຊານນີ້ ກໍຖືກປຸງແຕ່ງແລ້ວ ກໍສິ່ງໃດສິ່ງໜຶ່ງທີ່ຖືກ ປຸງແຕ່ງແລ້ວ ສິ່ງນັ້ນບໍ່ທ່ຽງ ມີຄວາມດັບໄປເປັນທຳມະດາ" ພິກຂຸນັ້ນ ດຳລົງຢູ່ໃນທຳ ນັ້ນແລ້ວ ຍ່ອມບັນລຸຄວາມສິ້ນໄປແຫ່ງອາສະວະທັງຫລາຍ ຫາກຍັງບໍ່ບັນລຸຄວາມສິ້ນໄປ ແຫ່ງອາສະວະທັງຫລາຍ ກໍຈະເປັນໂອປະປາຕິກະຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ ດ້ວຍຄວາມຍິນດີເພີດເພີນໃນທຳນັ້ນ ໆ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ

ຄະຫະບໍດີ ທຳອັນເປັນເອກແມ່ນນີ້ ເຊິ່ງເປັນທີ່ລຸດພົ້ນແຫ່ງຈິດທີ່ຍັງບໍ່ລຸດພົ້ນ ເປັນທີ່ເຖິງຄວາມສິ້ນໄປແຫ່ງອາສະວະທັງຫລາຍທີ່ຍັງບໍ່ສິ້ນໄປ ແລະ ເປັນທີ່ບັນລຸທຳເປັນແດນກະເສມຈາກໂຍຄະອັນປະເສີດ ທີ່ຍັງບໍ່ບັນລຸໂດຍລຳດັບຂອງພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດໄວ້ຖືກຕ້ອງແລ້ວ (໑໑)"

## ທະສະມະຄະຫະບໍດີເຫຼື້ອມໃສທ່ານພຣະອານົນ

[໔໑] ເມື່ອທ່ານພຣະອານົນກ່າວແນວນີ້ແລ້ວ ທະສະມະຄະຫະບໍດີຊາວອັດຖະກະນະຄອນຈຶ່ງກ່າວ ວ່າ

"ທ່ານອານົນ ຂ້າພະເຈົ້າ ເມື່ອສະແຫວງຫາປະຕູອະມະຕະທຳປະຕູດຽວໄດ້ຮັບປະຕູ ອະມະຕະທຳ ໑໑ ປະຕູເວລາດຽວກັນ ປຽບຄືບຸຣຸດສະແຫວງຫາແຫລ່ງຂຸມຊັບຂຸມດຽວ ເພິ່ງພົບແຫລ່ງຂຸມຊັບ ໑໑ ຂຸມເວລາດຽວກັນ ຂ້າພະເຈົ້າຈັກສາມາດເຮັດຕົນ ໃຫ້ປອດໄພໄດ້ໂດຍປະຕູອະມະຕະທຳ ໑໑ ປະຕູນີ້ປະຕູໃດປະຕູໜຶ່ງ ປຽບຄືບຸຣຸດມີເຮືອນ ໑໑ ປະຕູ ເມື່ອເຮືອນນັ້ນຖືກໄຟໄໝ້ ບຸຣຸດນັ້ນສາມາດເຮັດຕົນໃຫ້ປອດໄພ ໄດ້ໂດຍປະຕູໃດປະຕູໜຶ່ງ

ທ່ານອານົນ ທຳມະດາອັນຍະເດຍຣະຖີເຫລົ່ານີ້ ຍັງສະແຫວງຫາຊັບບູຊາອາຈານ ເພື່ອອາຈານ ສ່ວນຂ້າພະເຈົ້າຈັກບໍ່ທຳການບູຊາທ່ານອານົນໄດ້ແນວໃດ?"

ຄັ້ງນັ້ນແລ ທະສະມະຄະຫະບໍດີຊາວອັດຖະກະນະຄອນນິມົນພິກຂຸສົງຊາວເມືອງປາຕະລິບຸດ ແລະ ເຊີນຊາວເມືອງເວສາລີໃຫ້ປະຊຸມກັນ ແລ້ວອັງຄາດພິກຂຸສົງນັ້ນໃຫ້ອີ່ມໜຳສຸກສະບາຍດ້ວຍຂອງຫຍ້ຳຂອງຂ້ອຍອັນປະນີດ ດ້ວຍຕົນເອງ ນິມົນພິກຂຸໃຫ້ຄອງຜ້າຮູປລະ ໑ ຄູ່ ນິມົນທ່ານພຣະອານົນ ໃຫ້ຄອງໄຕຣຈີວອນ ແລະ ໄດ້ໃຫ້ສ້າງວິຫານ ໕໐໐ ຫລັງຖວາຍທ່ານພຣະອານົນ ດັ່ງນີ້ແລ

**ອັດຖະກະນາຄະຣະສູດທີ່ ໘ ຈົບ**

# ៦. ເສຂະປະຕິປະທາສູດ

## ວ່າດ້ວຍຂໍ້ປະຕິບັດຂອງພຣະເສຂະ

[໘໘] ຂ້າພະເຈົ້າໄດ້ຟັງມາແບວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ນິໂຄທາຣາມ ເຂດກຣຸງກະບິນລະພັດ ແຄວັ້ນສັກກະ ສະໄໝນັ້ນແລ ຫ້ອງປະຊຸມຫຼວງຫລັງໃໝ່ທີ່ພວກເຈົ້າສາກະຍະຜູ້ຄອງກຣຸງກະບິນລະພັດ ຊົງໃຫ້ສ້າງສຳເລັດໄດ້ບໍ່ດົນ ຍັງບໍ່ມີສະມະນະ ພາມ ຫຼືໃຜ ໆ ທີ່ເປັນມະນຸດ ເຂົ້າພັກອາໄສ ຕໍ່ມາ ພວກເຈົ້າສາກະຍະຜູ້ຄອງກຣຸງກະບິນລະພັດໄດ້ສະເດັດເຂົ້າໄປເຝົ້າພຣະ ຜູ້ມີພຣະພາກຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນ ພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ຫ້ອງປະຊຸມຫຼວງຫລັງໃໝ່ທີ່ພວກເຈົ້າສາກະຍະຜູ້ຄອງກຣຸງກະບິນລະພັດໃຫ້ສ້າງສຳເລັດໄດ້ບໍ່ດົນ ຍັງບໍ່ມີສະມະນະ ພາມ ຫຼື ໃຜ ໆ ທີ່ເປັນມະນຸດເຂົ້າພັກອາໄສ ຂໍພຣະຜູ້ມີພຣະພາກເຈົ້າຊົງໃຊ້ຫ້ອງປະຊຸມຫຼວງນັ້ນເປັນປະຖົມເລີກດ້ວຍເທີ້ນ ພວກເຈົ້າສາກະຍະກຣຸງກະບິນລະພັດຈະໃຊ້ພາຍຫລັງທີ່ພຣະຜູ້ມີພຣະພາກເຈົ້າຊົງໃຊ້ເປັນ ປະຖົມເລີກແລ້ວ ຂໍ້ນັ້ນຈະເພິ່ງເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອສຸກແກ່ພວກເຈົ້າສາກະຍະຜູ້ຄອງ ກຣຸງກະບິນລະພັດຕະຫຼອດການລະນານ"

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ ລຳດັບນັ້ນ ພວກເຈົ້າສາກະຍະຜູ້ຄອງກຣຸງກະບິນລະພັດ ຊົງຮູ້ອາການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງຊົງລຸກຈາກທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າກະທຳປະທັກຂິນແລ້ວສະເດັດເຂົ້າໄປສູ່ຫ້ອງປະຊຸມຫຼວງຫລັງໃໝ່ ແລ້ວຈຶ່ງຮັບສັ່ງໃຫ້ປູລາດຫ້ອງປະຊຸມຫຼວງດ້ວຍເຄື່ອງປູລາດທົ່ວທຸກແຫ່ງ ໃຫ້ປູລາດອາສະນະ ຕັ້ງໝໍ້ນ້ຳ ເຍືອງໄຟນ້ຳມັນ ແລ້ວສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວໄດ້ປະທັບຢືນຢູ່ທີ່ທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີ ພຣະພາກວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫລາຍປູລາດຫ້ອງປະຊຸມຫຼວງດ້ວຍເຄື່ອງປູລາດທົ່ວທຸກແຫ່ງ ໃຫ້ປູລາດອາສະນະ ຕັ້ງໝໍ້ນ້ຳ ເຍືອງໄຟນ້ຳມັນແລ້ວ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ ຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກຖືບາດແລະຈີວອນ ສະເດັດເຂົ້າໄປສູ່ຫ້ອງປະຊຸມຫຼວງພ້ອມດ້ວຍພິກຂຸສົງ ຊົງລ້າງພຣະບາດແລ້ວສະເດັດເຂົ້າໄປສູ່ຫ້ອງ

ປະຊຸມຫຼວງ ປະທັບນັ່ງອີງເສົາກາງ ອວ່າຍໜ້າໄປທາງທິດຕາເວັນອອກ ແມ່ນພິກຂຸສົງກໍລ້າງຕີນເຂົ້າໄປ ສູ່ຫ້ອງປະຊຸມຫຼວງນັ່ງອີງຝາດ້ານຫລັງ ຜິງໜ້າໄປທາງທິດຕາເວັນອອກ ນະ ເບື້ອງພຣະປຣິດສະດາງ ພຣະຜູ້ມີພຣະພາກເຈົ້າ ສ່ວນພວກເຈົ້າສາກະຍະຜູ້ຄອງກຣຸງກະບິນລະພັດລ້າງພຣະບາດແລ້ວ ສະເດັດເຂົ້າໄປສູ່ຫ້ອງປະຊຸມຫຼວງປະທັບນັ່ງອີງຝາດ້ານຕາເວັນອອກ ອວ່າຍໜ້າໄປທາງທິດຕາເວັນຕົກ ນະ ເບື້ອງພຣະພັກພຣະຜູ້ມີພຣະພາກເຈົ້າຈາກນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພວກເຈົ້າ ສາກະຍະຜູ້ຄອງກຣຸງກະບິນລະພັດເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາຕະຫຼອດຣາຕີ ແລ້ວຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ

“ອານົນ ທ່ານຈົ່ງຊີ້ແຈ່ງເສຂະປະຕິປະທາໃຫ້ແຈ້ງຊັດ ແກ່ພວກເຈົ້າສາກະຍະຜູ້ຄອງກຣຸງກະບິນລະພັດເທີ້ນ ເຮົາເມື່ອຍຫລັງຈະຂໍພັກຈັກນອຍ”

ທ່ານພຣະອານົນ ທູນຮັບສະໜອງພຣະດຳຣັດແລ້ວ ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປູຜ້າສັງຄາຕິເປັນ ໔ ຊັ້ນ ຊົງສຳເລັດສີຫະໄສຍາດ໔ ໂດຍສະແຄງຂວາ ຊ້ອນພຣະບາດເຫຼື່ອມພຣະບາດ ຊົງມີສະຕິສຳປະຊັນຍະ ກຳນົດພຣະຫະໄທພ້ອມຈະສະເດັດລຸກຂຶ້ນ

[໔໓] ລຳດັບນັ້ນ ທ່ານພຣະອານົນເຊີນເຈົ້າສາກະຍະມະຫານາມມາແລ້ວກ່າວ ວ່າ “ເຈົ້າມະຫານາມ ພຣະອະຣິຍະສາວົກໃນພຣະທຳວິໄນນີ້ ເປັນຜູ້ສົມບູນດ້ວຍສີນ ຄຸ້ມຄອງທະວາຣະໃນອິນຊີທັງຫລາຍ໓ ຮູ້ຈັກປະມານໃນການບໍຣິໂພກ ປະກອບຄວາມພຽນເຄື່ອງຕື່ນຢ່າງຕໍ່ເນື່ອງປະກອບດ້ວຍສັດທຳ໔ ໗ ປະການ ເປັນຜູ້ໄດ້ຊານ ໔ ອັນເປັນທຳອາໄສຈິດອັນຍິ່ງ ເປັນທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

[໔໔] ພຣະອະຣິຍະສາວົກເປັນຜູ້ສົມບູນດ້ວຍສີນ ເປັນແນວໃດ?

ຄື ພຣະອະຣິຍະສາວົກໃນພຣະທຳວິໄນນີ້ ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນຢູ່ ມີປົກກະຕິເຫັນໄພໃນໂທດແມ່ນເລັກນ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫລາຍ

ເຈົ້າມະຫານາມ ພຣະອະຣິຍະສາວົກເປັນຜູ້ສົມບູນດ້ວຍສີນ ເປັນແນວນີ້ແລ (໑)

ພຣະອະຣິຍະສາວົກເປັນຜູ້ຄຸ້ມຄອງທະວາຣະໃນອິນຊີທັງຫລາຍ ເປັນແນວໃດ?

ຄື ພຣະອະຣິຍະສາວົກໃນພຣະທຳວິໄນນີ້ ເຫັນຮູບທາງຕາແລ້ວບໍ່ໂຮມຖື ບໍ່ແຍກຖືຍ່ອມປະຕິບັດເພື່ອສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວ ຈະເປັນເຫດໃຫ້ບາບອະກຸສົນທຳຄືອະພິດຊາ ແລະ ໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ

ຟັງສຽງທາງຫູ ຯລຯ
ດົມກິ່ນທາງດັງ ຯລຯ
ຊີມຣົດທາງລີ້ນ ຯລຯ
ຖືກຕ້ອງໂຜດຖັບພະທາງກາຍຯລຯ

ຮູ້ທໍາມາຣົມທາງໃຈແລ້ວບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວ ຈະເປັນເຫດໃຫ້ບາບອະກຸສົນທໍາຄືອະພິດຊາ ແລະໂທມະນັດຄອບງໍາໄດ້ ຈຶ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ

ເຈົ້າມະຫານາມ ພຣະອະຣິຍະສາວົກເປັນຜູ້ຄຸ້ມຄອງທະວາຣະໃນອິນຊີທັງຫລາຍ ເປັນແນວນີ້ແລ (໔)

ພຣະອະຣິຍະສາວົກເປັນຜູ້ຮູ້ຈັກປະມານໃນການບໍຣິໂພກ ເປັນແນວໃດ?

ຄື ພຣະອະຣິຍະສາວົກໃນພຣະທໍາວິໄນນີ້ ພິຈາລະນາໂດຍແຍກຄາຍແລ້ວຈຶ່ງກືນກິນອາຫານ ບໍ່ແມ່ນເພື່ອຫລີ້ນ ບໍ່ແມ່ນເພື່ອມົວເມົາ ບໍ່ແມ່ນເພື່ອປະດັບ ບໍ່ແມ່ນເພື່ອຕົກແຕ່ງ ແຕ່ກືນກິນອາຫານພຽງເພື່ອຄວາມດໍາລົງຢູ່ໄດ້ແຫ່ງກາຍນີ້ ເພື່ອໃຫ້ກາຍນີ້ເປັນໄປໄດ້ ເພື່ອກໍາຈັດຄວາມບຽດບຽນ ເພື່ອອະນຸເຄາະພົມມະຈັນ ດ້ວຍຄິດເຫັນວ່າ “ເຮົາຈັກກໍາຈັດເວທະນາເກົ່າ ແລະຈັກບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ຄວາມດໍາເນີນໄປແຫ່ງກາຍ ຄວາມບໍ່ມີໂທດ ແລະ ການຢູ່ຜາສຸກ ຈັກມີແກ່ເຮົາ”

ເຈົ້າມະຫານາມ ພຣະອະຣິຍະສາວົກເປັນຜູ້ຮູ້ຈັກປະມານໃນການບໍຣິໂພກ ເປັນແນວນີ້ແລ (໖)

ພຣະອະຣິຍະສາວົກເປັນຜູ້ປະກອບຄວາມພຽນເຄື່ອງຕື່ນຢ່າງຕໍ່ເນື່ອງ ເປັນແນວໃດ?

ຄື ພຣະອະຣິຍະສາວົກໃນພຣະທໍາວິໄນນີ້ ຊໍາຣະຈິດໃຫ້ບໍລິສຸດຈາກທໍາທີ່ເປັນເຄື່ອງຂັດຂວາງ ດ້ວຍການຈົງກົມ ດ້ວຍການນັ່ງ ເມີດມື້ ຊໍາຣະຈິດໃຫ້ບໍລິສຸດຈາກທໍາທີ່ເປັນເຄື່ອງຂັດຂວາງ ດ້ວຍການຈົງກົມ ດ້ວຍການນັ່ງ ຕະຫຼອດປະຖົມມະຍາມແຫ່ງຣາຕີ ນອນຄືຣາດຊະສີໂດຍຂ້າງເບື້ອງຂວາ ຊ້ອນຕີນເຫຼື່ອມຕີນ ມີສະຕິສໍາປະຊັນຍະ ກໍານົດໃຈພ້ອມ ຈະລຸກຂຶ້ນ ຕະຫຼອດມັດຊິມະຍາມແຫ່ງຣາຕີ ລຸກຂຶ້ນຊໍາຣະຈິດໃຫ້ບໍລິສຸດຈາກທໍາທີ່ເປັນເຄື່ອງຂັດຂວາງດ້ວຍການຈົງກົມ ດ້ວຍການນັ່ງ ຕະຫຼອດປັດສິມມະຍາມແຫ່ງຣາຕີ

ເຈົ້າມະຫານາມ ພຣະອະຣິຍະສາວົກເປັນຜູ້ປະກອບຄວາມພຽນເຄື່ອງຕື່ນຢ່າງຕໍ່ເນື່ອງ ເປັນແນວນີ້ແລ (໘)

## ສັດທຳ ໗ ປະການ

[໔໕] ພຣະອະຣິຍະສາວິກາເປັນຜູ້ປະກອບດ້ວຍສັດທຳ ໗ ປະການ ເປັນແນວໃດ?

ຄື ພຣະອະຣິຍະສາວິກາໃນພຣະທຳວິໄນນີ້

໑. ເປັນຜູ້ມີສັດທາ ຄື ເຊື່ອການຕັດສະຣູ້ຂອງພຣະຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກ ຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະໃນສະເດັດໄປດີ ຣູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງ ເທວະດາແລະມະນຸດທັງຫລາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ"

໒. ເປັນຜູ້ມີຫິຣິ ຄື ລະອາຍກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ລະອາຍ ການປະກອບບາບອະກຸສົນທຳ

໓. ເປັນຜູ້ມີໂອຕຕັປປະ ຄື ສະດຸ້ງຢ້ານກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະ ຣິດ ສະດຸ້ງຢ້ານການປະກອບບາບອະກຸສົນທຳ

໔. ເປັນພະຫູສູດ ຊົງສຸຕະ໑ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳເຫລົ່ານີ້ທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນທີ່ສຸດ ພ້ອມທັງອັດຖະແລະພະຍັນຊະນະ ປະກາດພົມມະຈັນບໍລິສຸດ ບໍລິບູນ ຄົບຖ້ວນ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະ ຫຼອດດີດ້ວຍທິດຖິ

໕. ເປັນຜູ້ຜາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອຄວາມເຖິງພ້ອມ ແຫ່ງກຸສົນທຳ ເປັນຜູ້ມີກຳລັງ ມີຄວາມບາກບັ່ນໝັ້ນຄົງ ບໍ່ທອດຖິ້ມທຸລະໃນກຸສົນທຳທັງຫລາຍ

໖. ເປັນຜູ້ມີສະຕິ ຄື ປະກອບດ້ວຍສະຕິແລະປັນຍາທີ່ຍິ່ງ ຈືໄດ້ ຣະນຶກໄດ້ ແນວແມ່ນຍຳເຖິງສິ່ງທີ່ເຮັດ ແລະ ຄຳທີ່ເວົ້າໄວ້ແມ່ນດົນມາແລ້ວ

໗. ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາທີ່ເຫັນຄວາມເກີດແລະຄວາມດັບ ອັນປະເສີດ ທຳລາຍກິເລດໃຫ້ເຖິງຄວາມສິ້ນສຸດແຫ່ງທຸກໂດຍຖືກຕ້ອງ

ເຈົ້າມະຫານາມ ພຣະອະຣິຍະສາວິກາເປັນຜູ້ປະກອບດ້ວຍສັດທຳ ໗ ປະການ ເປັນແນວນີ້ແລ (໕-໑໑)

[໔໖] ພຣະອະຣິຍະສາວົກເປັນຜູ້ໄດ້ຊານ ໔ ອັນເປັນທຳອາໄສຈິດອັນຍິ່ງ ເປັນທຳເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ເປັນແນວໃດ?

ຄື ພຣະອະຣິຍະສາວົກໃນພຣະທຳວິໄນນີ້ ສະຫງັດຈາກກາມ ແລະອະກຸສົນທຳທັງຫລາຍ ແລ້ວບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບ ລະງັບໄປ ບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີ ວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກວິເວກຢູ່ ຍ້ອນປີຕິຈາງຄາຍອອກມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫລາຍ ສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ" ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນ ອຸເປກຂາຢູ່

ເຈົ້າມະຫານາມ ພຣະອະຣິຍະສາວົກເປັນຜູ້ໄດ້ຊານ ໔ ເຊິ່ງເປັນທຳອາໄສຈິດອັນຍິ່ງເປັນທຳເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກເປັນແນວນີ້ແລ (໑໔-໑໕)

## ອຸປະມາດ້ວຍໄຂ່ໄກ່ທີ່ໄກ່ແມ່ນອນຟັກ

[໔໗] ເຈົ້າມະຫານາມ ຍ້ອນພຣະອະຣິຍະສາວົກເປັນຜູ້ສົມບູນດ້ວຍສິນແນວນີ້ ເປັນຜູ້ຄຸ້ມຄອງທະວາຣະໃນອິນຊີທັງຫລາຍແນວນີ້ ເປັນຜູ້ຮູ້ຈັກປະມານໃນການບໍຣິໂພກແນວນີ້ ເປັນຜູ້ປະກອບຄວາມພຽນເຄື່ອງຕື່ນຢ່າງຕໍ່ເນື່ອງແນວນີ້ ເປັນຜູ້ປະກອບດ້ວຍສັດທຳ ໗ ປະການແນວນີ້ເປັນຜູ້ໄດ້ຊານ ໔ ອັນເປັນທຳອາໄສຈິດອັນຍິ່ງ ເປັນທຳເຄື່ອງ ຢູ່ເປັນສຸກໃນປັດຈຸບັນຕາມປາຖະໜາໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກແນວນີ້ ພຣະອະຣິຍະ-ສາວົກນີ້ບັນດິດສັນເສີນວ່າ ເປັນຜູ້ມີເສຂະປະຕິປະທາ ເປັນຜູ້ເຖິງພ້ອມດ້ວຍຄຸນນະທຳເຊິ່ງເປັນ ຄືໜ່ວຍໄຂ່ໄກ່ທີ່ບໍ່ເນົ່າ ເປັນຜູ້ຄວນແກ່ການທຳລາຍກິເລດດ້ວຍຍານ ເປັນຜູ້ຄວນແກ່ການຕັດສະຣູ້ ແລະຄວນແກ່ການບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດ ຟອງໄຂ່ຂອງໄກ່ແມ່ ໘ ຟອງ ໑໐ ຟອງ ຫຼື ໑໒ ຟອງທີ່ໄກ່ແມ່ໝູບຕຸ້ມໄວ້ຢ່າງດີ ໃຫ້ຄວາມອົບອຸ່ນແນວ ສະໝ່ຳສະເໝີ ຟັກແລ້ວຢ່າງດີ ເຖິງວ່າໄກ່ແມ່ນັ້ນຈະບໍ່ເກີດຄວາມປາຖະໜາແນວນີ້ວ່າ "ເຮັດແນວໃດນໍ ຂໍໄກ່ນ້ອຍເຫລົ່ານີ້ເພິ່ງໃຊ້ປາຍເລັບຫຼືສົບແຫຼມເຈາະທຳລາຍເປືອກໄຂ່ອອກມາໄດ້ໂດຍສະວັສດີພາບ" ກໍຕາມ ເຖິງແນວນັ້ນ ໄກ່ນ້ອຍເຫຼົ່ານັ້ນ ກໍຕ້ອງເຈາະທຳລາຍເປືອກໄຂ່ດ້ວຍປາຍເລັບ ຫຼື ສົບແຫຼມອອກມາໂດຍສະວັສດີພາບໄດ້ ແມ່ນສັນໃດ ພຣະອະຣິຍະສາວົກກໍສັນນັ້ນຄືກັນ ຍ້ອນເປັນຜູ້ສົມບູນດ້ວຍສິນແນວນີ້ ເປັນຜູ້ຄຸ້ມຄອງທະວາຣະ ໃນອິນຊີທັງຫລາຍແນວນີ້ ເປັນຜູ້ຮູ້ຈັກປະມານໃນການບໍຣິໂພກແນວນີ້ ເປັນຜູ້ປະກອບ ຄວາມພຽນເຄື່ອງຕື່ນຢ່າງຕໍ່ເນື່ອງແນວນີ້ ເປັນຜູ້ປະກອບດ້ວຍສັດທຳ ໗ ປະການ

ແນວນີ້ ເປັນຜູ້ໄດ້ຊານ ໔ ອັນເປັນທຳອາໄສຈິດອັນຍິ່ງ ເປັນທຳເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກແນວນີ້

ເຈົ້າມະຫານາມ ພຣະອະຣິຍະສາວົກນີ້ບັນດິດສັນເສີນວ່າ ເປັນຜູ້ມີເສຂະປະຕິປະທາ ເປັນຜູ້ເຖິງພ້ອມດ້ວຍຄຸນນະທຳເຊິ່ງເປັນຄືໜ່ວຍໄຂ່ໄກ່ທີ່ບໍ່ເນົ່າ ເປັນຜູ້ຄວນແກ່ການທຳລາຍກິເລດ ດ້ວຍຍານ ເປັນຜູ້ຄວນແກ່ການຕັດສະຣູ້ ແລະ ຄວນແກ່ການບັນລຸທຳອັນເປັນແດນກະເສມຈາກໂຍຄະອັນປະເສີດ

[໔໗] ເຈົ້າມະຫານາມ ພຣະອະຣິຍະສາວົກນັ້ນ ອາໄສຈະຕຸດຖະຊານ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ຍອດຢ້ຽມນີ້ທີ່ນັ້ນ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໗໖໗ ຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້ ນີ້ເປັນການທຳລາຍກິເລດດ້ວຍຍານຂໍ້ທີ່ ໑ ຂອງພຣະອະຣິຍະສາວົກນັ້ນ ປຽບຄື ໄກ່ນ້ອຍອອກຈາກເປືອກໄຂ່ໄດ້ ສັນນັ້ນ (໑)

ເຈົ້າມະຫານາມ ພຣະອະຣິຍະສາວົກນັ້ນອາໄສຈະຕຸດຖະຊານ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ຍອດຢ້ຽມນີ້ທີ່ນັ້ນ ເຫັນໝູ່ສັດ ໗໖໗໔ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ທ່ານຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳ ນີ້ເປັນການທຳລາຍກິເລດດ້ວຍຍານຂໍ້ທີ່ ໒ ຂອງພຣະ ອະຣິຍະສາວົກນັ້ນ ປຽບຄືໄກ່ນ້ອຍອອກຈາກເປືອກໄຂ່ໄດ້ ສັນນັ້ນ (໒)

ເຈົ້າມະຫານາມ ພຣະອະຣິຍະສາວົກນັ້ນອາໄສຈະຕຸດຖະຊານ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ຍອດຢ້ຽມນີ້ທີ່ນັ້ນ ຍ່ອມເຮັດໃຫ້ແຈ້ງເຈໂຕວິມຸດຕິ໑ ປັນຍາວິມຸດຕິ໒ອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ນີ້ເປັນການທຳລາຍກິເລດດ້ວຍຍານຂໍ້ທີ່ ໓ ຂອງພຣະອະຣິຍະສາວົກນັ້ນ ປຽບຄືໄກ່ນ້ອຍອອກຈາກເປືອກໄຂ່ໄດ້ ສັນນັ້ນ (໓)

## ຜູ້ພຽບພ້ອມດ້ວຍວິດຊາແລະຈະຣະນະ

[໔໘] ເຈົ້າມະຫານາມ ການທີ່ພຣະອະຣິຍະສາວົກເປັນຜູ້ສົມບູນດ້ວຍສີນແມ່ນນີ້ ກໍເປັນຈະຣະນະ໓ຂອງພຣະອະຣິຍະສາວົກປະການໜຶ່ງ

ການທີ່ພຣະອະຣິຍະສາວົກ ເປັນຜູ້ຄຸ້ມຄອງທະວາຣະໃນອິນຊີທັງຫລາຍແມ່ນນີ້ ກໍເປັນຈະຣະນະຂອງພຣະອະຣິຍະສາວົກປະການໜຶ່ງ

ການທີ່ພຣະອະຣິຍະສາວົກ ເປັນຜູ້ຮູ້ຈັກປະມານໃນການບໍຣິໂພກແມ່ນນີ້ ກໍເປັນຈະຣະນະຂອງ ພຣະອະຣິຍະສາວົກປະການໜຶ່ງ

ການທີ່ພຣະອະຣິຍະສາວົກ ເປັນຜູ້ປະກອບຄວາມພຽນເຄື່ອງຕື່ນຢ່າງຕໍ່ເນື່ອງແມ່ນນີ້ ກໍເປັນຈະຣະນະຂອງພຣະອະຣິຍະສາວົກປະການໜຶ່ງ

ການທີ່ພຣະອະຣິຍະສາວົກເປັນຜູ້ປະກອບດ້ວຍສັດທຳ ໗ ປະການແມ່ນນີ້ ກໍເປັນຈະຣະນະຂອງພຣະອະຣິຍະສາວົກປະການໜຶ່ງ

ການທີ່ພຣະອະຣິຍະສາວົກເປັນຜູ້ໄດ້ຊານ ໔ ອັນເປັນທຳອາໄສຈິດອັນຍິ່ງ ເປັນທຳເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກແມ່ນນີ້ ກໍເປັນຈະຣະນະຂອງພຣະອະຣິຍະສາວົກປະການໜຶ່ງ

ການທີ່ພຣະອະຣິຍະສາວົກຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໔ ຊາດແດ່ ໆລໆ ທ່ານຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້ແມ່ນນີ້ ກໍເປັນວິດຊາຂອງພຣະອະຣິຍະສາວົກປະການໜຶ່ງ

ການທີ່ພຣະອະຣິຍະສາວົກເຫັນໝູ່ສັດ ໆລໆ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ທ່ານຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແມ່ນນີ້ ກໍເປັນວິດຊາຂອງພຣະອະຣິຍະສາວົກປະການໜຶ່ງ

ການທີ່ພຣະອະຣິຍະສາວົກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນແມ່ນນີ້ ກໍເປັນວິດຊາຂອງພຣະອະຣິຍະສາວົກປະການໜຶ່ງ

ເຈົ້າມະຫານາມ ພຣະອະຣິຍະສາວົກນີ້ບັນດິດສັນເສີນວ່າ ເປັນຜູ້ພຽບພ້ອມດ້ວຍ ວິດຊາແມ່ນຍ້ອນເຫດນີ້ ເປັນຜູ້ພຽບພ້ອມດ້ວຍຈະຣະນະແມ່ນຍ້ອນເຫດນີ້ ເປັນຜູ້ພຽບພ້ອມ ດ້ວຍວິດຊາແລະຈະຣະນະແມ່ນຍ້ອນເຫດນີ້

## ຄາຖາຂອງພົມຊື່ສນັງກຸມານ

[໓໐] ເຈົ້າມະຫານາມ ແມ່ນພົມຊື່ສນັງກຸມານ ກໍໄດ້ກ່າວຄາຖານີ້ ວ່າ

"ໃນໝູ່ຊົນທີ່ຖືຕະກູນເປັນໃຫຍ່
ກະສັດຈັດວ່າປະເສີດທີ່ສຸດ
ສ່ວນທ່ານຜູ້ພຽບພ້ອມດ້ວຍວິດຊາແລະຈະຣະນະ
ຈັດວ່າເປັນຜູ້ປະເສີດທີ່ສຸດໃນໝູ່ເທວະດາແລະມະນຸດ"

ເຈົ້າມະຫານາມ ພົມຊື່ສນັງກຸມາຣະກະລ່າວຄາຖານັ້ນໄວ້ຖືກຕ້ອງ ບໍ່ແມ່ນບໍ່ຖືກຕ້ອງກ່າວໄວ້ດີແລ້ວ ບໍ່ແມ່ນບໍ່ກ່າວໄວ້ບໍ່ດີ ມີປະໂຫຍດ ບໍ່ແມ່ນບໍ່ມີປະໂຫຍດ ພຣະຜູ້ມີພຣະພາກເຈົ້າຊົງ ເຫັນດ້ວຍແລ້ວ"

ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າຊົງລຸກຂຶ້ນ ແລ້ວຕັດກັບທ່ານພຣະອານົນວ່າ "ດີແລ້ວ ດີແລ້ວ ອານົນ ດີແທ້ ອານົນ ທ່ານໄດ້ກ່າວເສຂະປະຕິປະທາແກ່ເຈົ້າສາກະຍະທັງຫລາຍ ຜູ້ຄອງກຣຸງກະບິນລະພັດ"

ທ່ານພຣະອານົນໄດ້ກ່າວພາສິດນີ້ແລ້ວ ພຣະສາດສະດາກໍຊົງຍິນດີ ເຈົ້າສາຍກະທັງຫລາຍຜູ້ຄອງກຣຸງກະບິນລະພັດ ກໍຊົງມີໃຈຍິນດີ ຕ່າງຊົມຊື່ນພາສິດຂອງທ່ານພຣະອານົນດັ່ງນີ້ແລ

**ເສຂະປະຕິປະທາສູດທີ່ ໓ ຈົບ**

# ໔. ໂປຕະລິຍະສູດ

## ວ່າດ້ວຍຄະຫະບໍດີຊື່ໂປຕະລິຍະ

[໓໑] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ທີ່ນິຄົມຂອງຊາວອັງຄຸດຕາປະຊື່ອາປະໜະ ແຄວ້ນອັງຄຸດຕາປະ ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດ ແລະຈີວອນສະເດັດເຂົ້າໄປບິນທະບາດຍັງອາປະໜະນິຄົມ ຊົງທ່ຽວບິນທະບາດໃນອາປະໜະນິຄົມແລ້ວ ສະເດັດກັບຈາກບິນທະບາດພາຍຫລັງສະເຫວີຍພຣະກະຍາຫານສຳເລັດແລ້ວ ຊົງເຂົ້າໄປສູ່ແຄມປ່າແຫ່ງໜຶ່ງເພື່ອພັກຜ່ອນກາງເວັນ ແລ້ວປະທັບນັ່ງພັກກາງເວັນ ນະ ເຫງົ້າໄມ້ແຫ່ງໜຶ່ງ ແມ່ນໂປຕະລິຍຄະຫະບໍດີເອງກໍເຊັ່ນກັນ ນຸ່ງຫົ່ມຮຽບຮ້ອຍກາງຮົ່ມໃສ່ເກີບ ຍ່າງທ່ຽວຫລິ້ນຢູ່ ໄດ້ເຂົ້າໄປສູ່ແຄມປ່ານັ້ນແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວໄດ້ຢືນຢູ່ທີ່ທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບໂປຕະລິຍຄະຫະບໍດີວ່າ "ຄະຫະບໍດີ ທີ່ນັ່ງມີຢູ່ ຖ້າທ່ານປະສົງ ກໍເຊີນນັ່ງເທີ້ນ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດເຊີນແບບນີ້ແລ້ວ ໂປຕະລິຍຄະຫະບໍດີໂກດ ນ້ອຍໃຈວ່າ "ພຣະສະມະນະໂຄດົມຕັດຮຽກເຮົາດ້ວຍຄຳວ່າ "ຄະຫະບໍດີ" ຈຶ່ງເຮັດເສີຍເສຍ

ແມ່ນເທື່ອທີ ໒ ພຣະຜູ້ມີພຣະພາກເຈົ້າກໍຕັດຮຽກໂປຕະລິຍຄະຫະບໍດີວ່າ "ຄະຫະບໍດີ ທີ່ນັ່ງມີຢູ່ ຖ້າທ່ານປະສົງ ກໍເຊີນນັ່ງເທີ້ນ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດເຊີນແບບນີ້ແລ້ວ ໂປຕະລິຍຄະຫະບໍດີໂກດ ນ້ອຍໃຈວ່າ

"ພຣະສະມະນະໂຄດົມຕັດຮຽກເຮົາດ້ວຍຄຳວ່າ "ຄະຫະບໍດີ" ຈຶ່ງເຮັດເສີຍເສຍ

ແມ່ນເທື່ອທີ ໓ ພຣະຜູ້ມີພຣະພາກເຈົ້າກໍຕັດຮຽກໂປຕະລີຍຄະຫະບໍດີວ່າ "ຄະຫະບໍດີ ທີ່ນັ່ງມີຢູ່ ຖ້າທ່ານປະສົງ ກໍເຊີນນັ່ງເທີ້ນ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດເຊີນແນວນີ້ແລ້ວ ໂປຕະລີຍຄະຫະບໍດີໂກດ ນ້ອຍໃຈວ່າ "ພຣະສະມະນະໂຄດົມ ຕັດຮຽກເຮົາດ້ວຍຄຳວ່າ ""ຄະຫະບໍດີ" ແລ້ວຈຶ່ງຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ "ທ່ານພຣະໂຄດົມ ພຣະດຳຣັດທີ່ພຣະອົງຕັດຮຽກຂ້າພຣະອົງດ້ວຍຄຳວ່າ "ຄະຫະບໍດີ" ນັ້ນ ບໍ່ເໝາະ ບໍ່ຄວນເລີຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຄະຫະບໍດີ ກິຣິຍາຂອງທ່ານ ທ່າທາງຂອງທ່ານ ລັກສະນະ ຂອງທ່ານເຫຼົ່ານັ້ນ ບົ່ງວ່າເປັນກິຣິຍາ ທ່າທາງ ລັກສະນະຂອງຄະຫະບໍດີຢູ່"

"ແມ່ນແລ້ວ ທ່ານພຣະໂຄດົມ ແຕ່ຂ້າພຣະອົງລະຖິ້ມການງານທຸກແນວແລ້ວ ຕັດຂາດໂວຫານທຸກແນວແລ້ວ"

"ຄະຫະບໍດີ ທ່ານລະຖິ້ມການງານທຸກແນວ ຕັດຂາດໂວຫານທຸກແນວ ແນວໃດນໍ?"

"ທ່ານພຣະໂຄດົມ ຂໍປະທານວະໂຣກາດ ຊັບກໍດີ ທັນຍະຊາດກໍດີ ເງິນກໍດີ ຄຳກໍດີ ທີ່ມີຢູ່ທັງໝົດ ຂ້າພຣະອົງມອບໃຫ້ເປັນມໍລະດົກແກ່ບຸດທັງຫລາຍ ຂ້າພຣະອົງບໍ່ຕ້ອງ ແນະນຳ ບໍ່ຕ້ອງຕັກເຕືອນພວກເຂົາໃນສິ່ງນັ້ນ ໆ ຂ້າພຣະອົງມີພຽງອາຫານແລະເຄື່ອງນຸ່ງຫົ່ມ ກໍພໍແລ້ວ ທ່ານພຣະໂຄດົມ ຂ້າພຣະອົງລະຖິ້ມການງານທຸກແນວ ຕັດຂາດໂວຫານທຸກແນວ ແນວນີ້ແລ"

"ຄະຫະບໍດີ ການຕັດຂາດໂວຫານທີ່ທ່ານເວົ້າມາ ເປັນແນວໜຶ່ງ ແຕ່ການຕັດຂາດໂວຫານໃນອະຣິຍະວິໄນ ເປັນອີກແນວໜຶ່ງ"

"ຂ້າແດ່ ພຣະອົງຜູ້ຈະເລີນ ກໍການຕັດຂາດໂວຫານໃນອະຣິຍະວິໄນ ເປັນແນວໃດນໍ? ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳ ຄື ການຕັດຂາດໂວຫານໃນ ອະຣິຍະວິໄນ ແກ່ຂ້າພຣະອົງດ້ວຍເທີ້ນ"

"ຄະຫະບໍດີ ຖ້າເຊັ່ນນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ໂປຕະລີຍຄະຫະບໍດີທູນຮັບສະໜອງພຣະດຳຣັດແລ້ວ

## ການຕັດໂວຫານ ໘ ປະການ

[໓໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຄະຫະບໍດີ ທຳ ໘ ປະການນີ້ ເປັນໄປເພື່ອການຕັດຂາດໂວຫານໃນອະຣິຍະວິໄນ

ທຳ ໘ ປະການ ອັນໃດແດ່ ຄື

໑. ບຸກຄົນເພິ່ງລະການຂ້າສັດໄດ້ ຍ້ອນອາໄສການບໍ່ຂ້າສັດ
໒. ບຸກຄົນເພິ່ງລະການລັກຊັບໄດ້ ຍ້ອນອາໄສການບໍ່ລັກຊັບ
໓. ບຸກຄົນເພິ່ງລະການເວົ້າຕົວະໄດ້ ຍ້ອນອາໄສການເວົ້າຈິງ
໔. ບຸກຄົນເພິ່ງລະການເວົ້າສັບສໍ່ໄດ້ ຍ້ອນອາໄສການບໍ່ເວົ້າສັບສໍ່
໕. ບຸກຄົນເພິ່ງລະຄວາມໂລບຄືຄວາມກຳໜັດຍິນດີໄດ້ ຍ້ອນອາໄສຄວາມບໍ່ໂລບຄືຄວາມບໍ່ກຳໜັດຍິນດີ
໖. ບຸກຄົນເພິ່ງລະການນິນທາແລະການປະທຸດສະຮ້າຍໄດ້ ຍ້ອນອາໄສການບໍ່ນິນທາ ແລະການບໍ່ປະທຸດສະຮ້າຍ
໗. ບຸກຄົນເພິ່ງລະຄວາມແຄ້ນເຄືອງໄດ້ ຍ້ອນອາໄສຄວາມບໍ່ແຄ້ນເຄືອງ
໘. ບຸກຄົນເພິ່ງລະຄວາມດູໝິ່ນໄດ້ ຍ້ອນອາໄສຄວາມບໍ່ດູໝິ່ນ

ຄະຫະບໍດີ ທຳ ໘ ປະການນີ້ແລ ເຮົາກ່າວໂດຍຫຍໍ້ ບໍ່ໄດ້ຈຳແນກໃຫ້ພິດສະດານ ຍ່ອມເປັນໄປເພື່ອການຕັດຂາດໂວຫານໃນອະຣິຍະວິໄນ"

ໂປຕະລິຍຄະຫະບໍດີຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ທຳ ໘ ປະການນີ້ ພຣະຜູ້ມີພຣະພາກຕັດໄວ້ໂດຍຫຍໍ້ ບໍ່ໄດ້ຈຳແນກໃຫ້ພິດສະດານ ຍ່ອມເປັນໄປເພື່ອການຕັດຂາດໂວຫານໃນອະຣິຍະວິໄນ ຂໍປະທານອະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດອະນຸເຄາະຈຳແນກທຳ ໘ ປະການນີ້ໃຫ້ພິດສະດານແກ່ຂ້າພຣະອົງດ້ວຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຄະຫະບໍດີ ຖ້າເຊັ່ນນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ໂປຕະລິຍຄະຫະບໍດີທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

[໓໓] "ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ບຸກຄົນເພິ່ງລະການຂ້າສັດໄດ້ ຍ້ອນອາໄສການບໍ່ຂ້າສັດ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ຄື ອະຣິຍະສາວົກໃນທຳວິໄນນີ້ເຫັນປະຈັກແຈ້ງດັ່ງນີ້ວ່າ "ເຮົາເປັນຜູ້ຂ້າສັດຍ້ອນເຫດແຫ່ງສັງໂຍດເຫຼົ່າໃດ ເຮົາເພິ່ງປະຕິບັດເພື່ອລະ ເພື່ອຕັດສັງໂຍດເຫຼົ່ານັ້ນສາ

ອັນໜຶ່ງ ເຮົາເປັນຜູ້ຂ້າສັດ ແມ່ນຕົນເອງກໍຍັງຕິຕຽນຕົນໄດ້ຍ້ອນການຂ້າສັດເປັນປັດໄຈ ຜູ້ຮູ້ພິຈາຣະນາແລ້ວຕິຕຽນໄດ້໑ ຍ້ອນການຂ້າສັດເປັນປັດໄຈ ຫລັງຈາກຕາຍແລ້ວທຸຄະຕິເປັນອັນຫວັງໄດ້ຍ້ອນການຂ້າສັດເປັນປັດໄຈ" ການຂ້າສັດນັ້ນເອງເປັນສັງໂຍດ ເປັນນິວອນ໔

ອັນໜຶ່ງ ອາສະວະແລະຄວາມຮ້ອນຮົນທີ່ທຳຄວາມຄັບແຄ້ນເຫຼົ່າໃດ ຈະເພິ່ງເກີດຂຶ້ນຍ້ອນການຂ້າສັດເປັນປັດໄຈ ເມື່ອບຸກຄົນເວັ້ນຂາດຈາກການຂ້າສັດແລ້ວ ອາສະວະແລະຄວາມຮ້ອນຮົນ ທີ່ທຳຄວາມຄັບແຄ້ນ໖ ເຫຼົ່ານັ້ນຈະບໍ່ມີ ຄຳທີ່ເຮົາກ່າວໄວ້ວ່າ "ບຸກຄົນເພິ່ງລະການຂ້າສັດໄດ້ ຍ້ອນອາໄສການບໍ່ຂ້າສັດ" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[໖໔] ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ບຸກຄົນເພິ່ງລະການລັກຊັບໄດ້ຍ້ອນອາໄສການບໍ່ລັກຊັບ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ຄື ອະຣິຍະສາວົກໃນທຳວິໄນນີ້ເຫັນປະຈັກແຈ້ງດັ່ງນີ້ວ່າ "ເຮົາເປັນຜູ້ລັກຊັບຍ້ອນເຫດແຫ່ງສັງໂຍດເຫຼົ່າໃດ ເຮົາເພິ່ງປະຕິບັດເພື່ອລະ ເພື່ອຕັດສັງໂຍດເຫຼົ່ານັ້ນສາ

ອັນໜຶ່ງ ເຮົາເປັນຜູ້ລັກຊັບ ແມ່ນຕົນເອງກໍຍັງຕິຕຽນຕົນໄດ້ຍ້ອນການລັກຊັບເປັນປັດໄຈ ຜູ້ຮູ້ພິຈາຣະນາແລ້ວ ເພິ່ງຕິຕຽນໄດ້ຍ້ອນການລັກຊັບເປັນປັດໄຈ ຫລັງຈາກຕາຍແລ້ວທຸຄະຕິເປັນອັນຫວັງໄດ້ຍ້ອນການລັກຊັບເປັນປັດໄຈ" ການລັກຊັບນັ້ນເອງເປັນ ສັງໂຍດ ເປັນນິວອນ

ອັນໜຶ່ງ ອາສະວະແລະຄວາມຮ້ອນຮົນທີ່ທຳຄວາມຄັບແຄ້ນເຫຼົ່າໃດ ຈະເພິ່ງເກີດຂຶ້ນຍ້ອນການລັກຊັບເປັນປັດໄຈ ເມື່ອບຸກຄົນເວັ້ນຂາດຈາກການລັກຊັບແລ້ວ ອາສະວະແລະຄວາມຮ້ອນຮົນທີ່ທຳຄວາມຄັບແຄ້ນເຫຼົ່ານັ້ນຈະບໍ່ມີ ຄຳທີ່ເຮົາກ່າວໄວ້ວ່າ "ບຸກຄົນເພິ່ງລະການ ລັກຊັບໄດ້ ຍ້ອນອາໄສການບໍ່ລັກຊັບ" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[໖໕] ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ບຸກຄົນເພິ່ງລະການເວົ້າຕົວະໄດ້ ຍ້ອນອາໄສການເວົ້າຈິງ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ຄື ອະຣິຍະສາວົກໃນທຳວິໄນນີ້ເຫັນປະຈັກແຈ້ງດັ່ງນີ້ວ່າ "ເຮົາເປັນຜູ້ເວົ້າຕົວະຍ້ອນເຫດແຫ່ງສັງໂຍດເຫຼົ່າໃດ ເຮົາເພິ່ງປະຕິບັດເພື່ອລະ ເພື່ອຕັດສັງໂຍດເຫຼົ່ານັ້ນສາ

ອັນໜຶ່ງ ເຮົາເປັນຜູ້ເວົ້າຕົວະ ແມ່ນຕົນເອງກໍຍັງຕິຕຽນຕົນໄດ້ຍ້ອນການເວົ້າຕົວະເປັນປັດໄຈ ຜູ້ຮູ້ພິຈາຣະນາແລ້ວເພິ່ງຕິຕຽນໄດ້ຍ້ອນການເວົ້າຕົວະເປັນປັດໄຈ ຫລັງຈາກຕາຍແລ້ວທຸ

ຄະຕິເປັນອັນຫວັງໄດ້ຍ້ອນການເວົ້າຕົວະເປັນປັດໄຈ" ການເວົ້າຕົວະນັ້ນເອງເປັນສັງໂຍດ ເປັນນິວອນ

ອັນໜຶ່ງ ອາສະວະ ແລະ ຄວາມຮ້ອນຮົນທີ່ທຳຄວາມຄັບແຄ້ນເຫຼົ່າໃດ ຈະເພິ່ງເກີດຂຶ້ນຍ້ອນການເວົ້າຕົວະເປັນປັດໄຈ ເມື່ອບຸກຄົນເວັ້ນຂາດຈາກການເວົ້າຕົວະແລ້ວ ອາສະວະແລະຄວາມຮ້ອນຮົນທີ່ທຳຄວາມຄັບແຄ້ນເຫຼົ່ານັ້ນຈະບໍ່ມີ ຄຳທີ່ເຮົາກ່າວໄວ້ວ່າ "ບຸກຄົນເພິ່ງລະການເວົ້າຕົວະໄດ້ ຍ້ອນອາໄສການເວົ້າຈິງ" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[໕໖] ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ບຸກຄົນເພິ່ງລະການເວົ້າສັບສໍ່ໄດ້ ຍ້ອນອາໄສການບໍ່ເວົ້າສັບສໍ່" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ຄື ອະຣິຍະສາວົກໃນທຳວິໄນນີ້ເຫັນປະຈັກແຈ້ງດັ່ງນີ້ວ່າ "ເຮົາເປັນຜູ້ເວົ້າສັບສໍ່ຍ້ອນເຫດແຫ່ງສັງໂຍດເຫຼົ່າໃດ ເຮົາເພິ່ງປະຕິບັດເພື່ອລະ ເພື່ອຕັດສັງໂຍດເຫຼົ່ານັ້ນສາ

ອັນໜຶ່ງ ເຮົາເປັນຜູ້ເວົ້າສັບສໍ່ ແມ່ນຕົນເອງກໍຍັງຕິຕຽນຕົນໄດ້ຍ້ອນການເວົ້າສັບສໍ່ເປັນປັດໄຈ ຜູ້ຮູ້ພິຈາຣະນາແລ້ວເພິ່ງຕິຕຽນໄດ້ຍ້ອນການເວົ້າສັບສໍ່ເປັນປັດໄຈ ຫລັງຈາກ ຕາຍແລ້ວທຸຄະຕິເປັນອັນຫວັງໄດ້ຍ້ອນການເວົ້າສັບສໍ່ເປັນປັດໄຈ" ການເວົ້າສັບສໍ່ນັ້ນເອງເປັນສັງໂຍດ ເປັນນິວອນ

ອັນໜຶ່ງ ອາສະວະແລະຄວາມຮ້ອນຮົນທີ່ທຳຄວາມຄັບແຄ້ນເຫຼົ່າໃດ ຈະເພິ່ງເກີດຂຶ້ນຍ້ອນການເວົ້າສັບສໍ່ເປັນປັດໄຈ ເມື່ອບຸກຄົນເວັ້ນຂາດຈາກການເວົ້າສັບສໍ່ແລ້ວ ອາສະວະແລະຄວາມຮ້ອນຮົນທີ່ທຳຄວາມຄັບແຄ້ນເຫຼົ່ານັ້ນຈະບໍ່ມີ ຄຳທີ່ເຮົາກ່າວໄວ້ວ່າ "ບຸກຄົນເພິ່ງລະການເວົ້າສັບສໍ່ໄດ້ ຍ້ອນອາໄສການບໍ່ເວົ້າສັບສໍ່" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[໕໗] ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ບຸກຄົນເພິ່ງລະຄວາມໂລບຄືຄວາມກຳໜັດ ຍິນດີໄດ້ ຍ້ອນອາໄສຄວາມບໍ່ໂລບຄືຄວາມບໍ່ກຳໜັດຍິນດີ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ຄື ອະຣິຍະສາວົກໃນທຳວິໄນນີ້ເຫັນປະຈັກແຈ້ງດັ່ງນີ້ວ່າ "ເຮົາເປັນຜູ້ມີຄວາມໂລບຄືຄວາມກຳໜັດຍິນດີຍ້ອນເຫດແຫ່ງສັງໂຍດເຫຼົ່າໃດ ເຮົາເພິ່ງປະຕິບັດເພື່ອລະ ເພື່ອຕັດ ສັງໂຍດເຫຼົ່ານັ້ນສາ

ອັນໜຶ່ງ ເຮົາເປັນຜູ້ມີຄວາມໂລບ ຄື ຄວາມກຳໜັດຍິນດີ ແມ່ນຕົນເອງກໍຍັງຕິຕຽນຕົນໄດ້ຍ້ອນຄວາມໂລບ ຄື ຄວາມກຳໜັດຍິນດີເປັນປັດໄຈ ຜູ້ຮູ້ພິຈາຣະນາແລ້ວເພິ່ງຕິຕຽນໄດ້ຍ້ອນຄວາມໂລບຄືຄວາມກຳໜັດຍິນດີເປັນປັດໄຈ ຫລັງຈາກຕາຍແລ້ວທຸຄະຕິເປັນອັນຫວັງໄດ້ ຍ້ອນຄວາມໂລບຄືຄວາມກຳໜັດຍິນດີເປັນປັດໄຈ" ຄວາມໂລບຄືຄວາມກຳໜັດຍິນດີນັ້ນເອງເປັນສັງໂຍດ ເປັນນິວອນ

ອັນໜຶ່ງ ອາສະວະ ແລະ ຄວາມຮ້ອນຮົນທີ່ທຳຄວາມຄັບແຄ້ນເຫຼົ່າໃດ ຈະເພິ່ງເກີດຂຶ້ນຍ້ອນຄວາມໂລບ ຄື ຄວາມກຳໜັດຍິນດີເປັນປັດໄຈ ເມື່ອບຸກຄົນເວັ້ນຂາດຈາກຄວາມໂລບຄືຄວາມກຳໜັດຍິນດີ ອາສະວະ ແລະ ຄວາມຮ້ອນຮົນທີ່ທຳຄວາມຄັບແຄ້ນເຫຼົ່ານັ້ນຈະບໍ່ມີ ຄຳທີ່ເຮົາກ່າວໄວ້ວ່າ "ບຸກຄົນເພິ່ງລະຄວາມໂລບຄືຄວາມກຳໜັດຍິນດີໄດ້ ຍ້ອນອາໄສຄວາມບໍ່ໂລບຄືຄວາມບໍ່ກຳໜັດຍິນດີ" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[໓໘] ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ບຸກຄົນເພິ່ງລະການນິນທາ ແລະ ການປະທຸດສະຮ້າຍໄດ້ ຍ້ອນອາໄສການບໍ່ນິນທາ ແລະ ການບໍ່ປະທຸດສະຮ້າຍ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ຄື ອະຣິຍະສາວົກໃນທຳວິໄນນີ້ເຫັນປະຈັກແຈ້ງດັ່ງນີ້ວ່າ "ເຮົາເປັນຜູ້ມີການນິນທາແລະການປະທຸດສະຮ້າຍຍ້ອນເຫດແຫ່ງສັງໂຍດເຫຼົ່າໃດ ເຮົາເພິ່ງປະຕິບັດເພື່ອລະ ເພື່ອຕັດສັງໂຍດເຫຼົ່ານັ້ນສາ

ອັນໜຶ່ງ ເຮົາເປັນຜູ້ມີການນິນທາ ແລະ ການປະທຸດສະຮ້າຍ ແມ່ນຕົນເອງກໍຍັງຕິຕຽນຕົນໄດ້ຍ້ອນການນິນທາ ແລະ ການປະທຸດສະຮ້າຍເປັນປັດໄຈ ຜູ້ຮູ້ພິຈາຣະນາແລ້ວເພິ່ງຕິຕຽນໄດ້ຍ້ອນການນິນທາ ແລະ ການປະທຸດສະຮ້າຍເປັນປັດໄຈ ຫລັງຈາກຕາຍແລ້ວທຸຄະຕິເປັນອັນຫວັງໄດ້ຍ້ອນການນິນທາ ແລະ ການປະທຸດສະຮ້າຍເປັນປັດໄຈ" ການນິນທາແລະການປະທຸດສະຮ້າຍນັ້ນເອງເປັນສັງໂຍດ ເປັນນິວອນ

ອັນໜຶ່ງ ອາສະວະ ແລະ ຄວາມຮ້ອນຮົນທີ່ທຳຄວາມຄັບແຄ້ນເຫຼົ່າໃດ ຈະເພິ່ງເກີດຂຶ້ນຍ້ອນການນິນທາ ແລະ ການປະທຸດສະຮ້າຍເປັນປັດໄຈ ເມື່ອບຸກຄົນບໍ່ມີການນິນທາ ແລະການປະທຸດສະຮ້າຍ ອາສະວະ ແລະ ຄວາມຮ້ອນຮົນທີ່ທຳຄວາມຄັບແຄ້ນເຫຼົ່ານັ້ນຈະບໍ່ມີ ຄຳທີ່ເຮົາກ່າວໄວ້ວ່າ "ບຸກຄົນເພິ່ງລະການນິນທາ ແລະ ການປະທຸດສະຮ້າຍໄດ້ ຍ້ອນອາໄສການບໍ່ນິນທາແລະການບໍ່ປະທຸດສະຮ້າຍ" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[໓໙] ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ບຸກຄົນເພິ່ງລະຄວາມແຄ້ນເຄືອງໄດ້ ຍ້ອນອາໄສຄວາມບໍ່ແຄ້ນເຄືອງ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ຄື ອະຣິຍະສາວົກໃນທຳວິໄນນີ້ເຫັນປະຈັກແຈ້ງດັ່ງນີ້ວ່າ "ເຮົາເປັນຜູ້ມີຄວາມ ແຄ້ນເຄືອງຍ້ອນເຫດແຫ່ງສັງໂຍດເຫຼົ່າໃດ ເຮົາເພິ່ງປະຕິບັດເພື່ອລະ ເພື່ອຕັດສັງໂຍດ ເຫຼົ່ານັ້ນສາ

ອັນໜຶ່ງ ເຮົາເປັນຜູ້ມີຄວາມແຄ້ນເຄືອງ ແມ່ນຕົນເອງກໍຍັງຕິຕຽນຕົນໄດ້ຍ້ອນຄວາມແຄ້ນເຄືອງເປັນປັດໄຈ ຜູ້ຮູ້ພິຈາຣະນາແລ້ວເພິ່ງຕິຕຽນໄດ້ຍ້ອນຄວາມແຄ້ນເຄືອງເປັນປັດໄຈ ຫລັງ

ຈາກ ຕາຍແລ້ວທຸຄະຕິເປັນອັນຫວັງໄດ້ ຍ້ອນຄວາມແຄ້ນເຄືອງເປັນປັດໄຈ" ຄວາມແຄ້ນເຄືອງນັ້ນເອງເປັນສັງໂຍດ ເປັນນິວອນ

ອັນໜຶ່ງ ອາສະວະແລະຄວາມຮ້ອນຮົນທີ່ທຳຄວາມຄັບແຄ້ນເຫຼົ່າໃດ ຈະເພິ່ງເກີດຂຶ້ນຍ້ອນຄວາມແຄ້ນເຄືອງເປັນປັດໄຈ ເມື່ອບຸກຄົນບໍ່ມີຄວາມແຄ້ນເຄືອງ ອາສະວະແລະຄວາມຮ້ອນຮົນ ທີ່ທຳຄວາມແຄ້ນເຄືອງເຫຼົ່ານັ້ນຈະບໍ່ມີ ຄຳທີ່ເຮົາກ່າວໄວ້ວ່າ "ບຸກຄົນເພິ່ງລະຄວາມແຄ້ນເຄືອງໄດ້ ຍ້ອນອາໄສຄວາມບໍ່ແຄ້ນເຄືອງ" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[໔໐] ເຮົາກ່າວໄວ້ແລ້ວເຊັ່ນນີ້ວ່າ "ບຸກຄົນເພິ່ງລະຄວາມດູໝິ່ນໄດ້ ຍ້ອນອາໄສຄວາມບໍ່ດູໝິ່ນ" ຍ້ອນອາໄສເຫດອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ຄື ອະຣິຍະສາວົກໃນທຳວິໄນນີ້ເຫັນປະຈັກແຈ້ງດັ່ງນີ້ວ່າ "ເຮົາເປັນຜູ້ດູໝິ່ນຍ້ອນເຫດແຫ່ງສັງໂຍດເຫຼົ່າໃດ ເຮົາເພິ່ງປະຕິບັດເພື່ອລະ ເພື່ອຕັດສັງໂຍດເຫຼົ່ານັ້ນສາ

ອັນໜຶ່ງ ເຮົາເປັນຜູ້ດູໝິ່ນ ແມ່ນຕົນເອງກໍຍັງຕິຕຽນຕົນໄດ້ຍ້ອນຄວາມດູໝິ່ນເປັນປັດໄຈ ຜູ້ຮູ້ພິຈາຣະນາແລ້ວ ເພິ່ງຕິຕຽນໄດ້ຍ້ອນຄວາມດູໝິ່ນເປັນປັດໄຈ ຫລັງຈາກຕາຍແລ້ວທຸຄະຕິເປັນອັນຫວັງໄດ້ຍ້ອນຄວາມດູໝິ່ນເປັນປັດໄຈ" ຄວາມດູໝິ່ນນັ້ນເອງເປັນສັງໂຍດ ເປັນນິວອນ

ອັນໜຶ່ງ ອາສະວະ ແລະ ຄວາມຮ້ອນຮົນທີ່ທຳຄວາມຄັບແຄ້ນເຫຼົ່າໃດ ຈະເພິ່ງເກີດຂຶ້ນຍ້ອນຄວາມດູໝິ່ນເປັນປັດໄຈ ເມື່ອບຸກຄົນບໍ່ດູໝິ່ນ ອາສະວະ ແລະ ຄວາມຮ້ອນຮົນທີ່ທຳຄວາມຄັບແຄ້ນເຫຼົ່ານັ້ນຈະບໍ່ມີ ຄຳທີ່ເຮົາກ່າວໄວ້ວ່າ "ບຸກຄົນເພິ່ງລະຄວາມດູໝິ່ນໄດ້ ຍ້ອນອາໄສຄວາມບໍ່ດູໝິ່ນ" ນັ້ນ ຍ້ອນອາໄສເຫດນີ້ ເຮົາຈຶ່ງກ່າວໄວ້

[໔໑] ຄະຫະບໍດີ ທຳ ໘ ປະການທີ່ເປັນໄປເພື່ອລະ ເພື່ອຕັດຂາດໂວຫານໃນອະຣິຍະວິໄນ ເຮົາກ່າວໄວ້ໂດຍຫຍໍ້ ຈຳແນກໄວ້ແລ້ວໂດຍພິດສະດານ ແຕ່ພຽງທໍ່ນີ້ຍັງບໍ່ຊື່ວ່າເປັນການຕັດຂາດໂວຫານທັງໝົດໄດ້ຄົບຖ້ວນໂດຍປະການທັງປວງໃນອະຣິຍະວິໄນ"

ໂປຕະລິຍຄະຫະບໍດີທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ແນວໃດບໍ ຈຶ່ງຈະຊື່ວ່າເປັນການຕັດຂາດໂວຫານທັງໝົດ ໄດ້ຄົບຖ້ວນໂດຍປະການທັງປວງໃນອະຣິຍະວິໄນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງ ໂດຍວິທີທີ່ຈະຕັດຂາດໂວຫານທັງໝົດໄດ້ຄົບຖ້ວນໂດຍປະການທັງປວງໃນອະຣິຍະວິໄນດ້ວຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ຄະຫະບໍດີ ຖ້າເຊັ່ນນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີເຮົາຈັກກ່າວ"

ໄປຕະລິຍຄະຫະບໍດີທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເລື້ອງນີ້ວ່າ

## ໂທດແຫ່ງກາມ ໗ ປະການ

[໔໘] "ຄະຫະບໍດີ ປຽບຄືໝາທີ່ກຳລັງຫິວໂຊ ຢືນຢູ່ໃກ້ຊຽງຂອງຄົນຂ້າງົວ ຄົນຂ້າງົວຫຼືລູກມືຂອງຄົນຂ້າງົວຜູ້ຊ່ຽວຊານ ໂຍນໂຄງກະດູກທີ່ປາດຊຳແຫຼະຊີ້ນອອກໝົດແລ້ວ ແຕ່ມີເລືອດຕິດຢູ່ແດ່ໄປໃຫ້ມັນ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໝາໂຕນັ້ນ ເມື່ອແທະໂຄງກະດູກທີ່ປາດຊຳແຫຼະຊີ້ນອອກໝົດແລ້ວ ແຕ່ມີເລືອດຕິດຢູ່ແດ່ນັ້ນ ຈະບັນເທົາຄວາມຫິວໄດ້ແດ່ບໍ"

"ບໍ່ໄດ້ ຂ້ານ້ອຍ"
"ຂໍ້ນັ້ນຍ້ອນເຫດໃດ"

"ຍ້ອນໂຄງກະດູກທີ່ປາດຊຳແຫຼະຊີ້ນອອກໝົດແລ້ວນັ້ນ ແມ່ນຈະມີເລືອດຕິດຢູ່ແດ່ ໝານັ້ນກໍຈະເພິ່ງມີຄວາມເມື່ອຍລ່າ ແລະຄວາມຫິວຫຼາຍຂຶ້ນອີກ ຂ້ານ້ອຍ"

"ຄະຫະບໍດີ ອະຣິຍະສາວົກກໍແນວນັ້ນຄືກັນ ເຫັນປະຈັກແຈ້ງດັ່ງນີ້ວ່າ "ພຣະຜູ້ມີພຣະພາກຕັດກາມທັງຫລາຍວ່າ ມີອຸປະມາດ້ວຍໂຄງກະດູກ ມີທຸກຫຼາຍ ມີຄວາມຄັບແຄ້ນ ຫຼາຍໂທດໃນກາມເຫຼົ່ານັ້ນມີຢູ່ຫຼາຍຍິ່ງ" ເມື່ອເຫັນໂທດແຫ່ງກາມນີ້ຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ແລ້ວ ຈຶ່ງເວັ້ນອຸເປກຂາທີ່ມີອາລົມຕ່າງກັນ ທີ່ອີງອາໄສອາລົມຕ່າງກັນ ແລ້ວຈະເລີນອຸເປກຂາທີ່ມີອາລົມດຽວ ທີ່ອີງອາໄສອາລົມດຽວ ເຊິ່ງເປັນທີ່ດັບບໍ່ເຫຼືອແຫ່ງຄວາມຖືໝັ້ນໂລກາມິດໂດຍປະການທັງປວງ

[໔໙] ຄະຫະບໍດີ ປຽບຄືນົກແຮ້ງ ນົກຕະກຸມ ຫຼື ນົກແຫລວ ຄາບຕ່ອນຊີ້ນບິນໄປ ຝູງນົກແຮ້ງກໍດີ ຝູງນົກຕະກຸມກໍດີ ຝູງນົກແຫລວກໍດີ ພາກັນໂຜເຂົ້າໄປຮຸມຈິກທຶ້ງ ຕ່ອນຊີ້ນນັ້ນທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຖ້ານກແຮ້ງ ນົກຕະກຸມ ຫຼືນົກແຫລວນັ້ນ ບໍ່ຟ້າວປ່ອຍຕ່ອນຊີ້ນນັ້ນເສຍ ມັນອາດເຖິງຕາຍ ຫຼືໄດ້ຮັບທຸກປາງຕາຍ ຍ້ອນຕ່ອນຊີ້ນນັ້ນເປັນເຫດແມ່ນບໍ"

"ແມ່ນ ຂ້ານ້ອຍ"
"ຄະຫະບໍດີ ອະຣິຍະສາວົກກໍແນວນັ້ນຄືກັນ ເຫັນປະຈັກແຈ້ງດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຕັດກາມທັງຫລາຍວ່າ ມີອຸປະມາດ້ວຍຕ່ອນຊີ້ນ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍໂທດໃນກາມເຫຼົ່ານັ້ນມີຢູ່ຫຼາຍຍິ່ງ" ເມື່ອເຫັນໂທດແຫ່ງກາມນີ້ຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ແລ້ວ ຈຶ່ງເວັ້ນອຸເປກຂາທີ່ມີອາລົມຕ່າງກັນ ທີ່ອີງອາໄສອາລົມຕ່າງກັນແລ້ວຈະເລີນອຸເປກຂາທີ່ມີອາລົມດຽວ ທີ່ອີງອາໄສອາລົມດຽວ ເຊິ່ງເປັນທີ່ດັບບໍ່ເຫຼືອແຫ່ງຄວາມຖືໝັ້ນໂລກາມິດໂດຍປະການທັງປວງ

[໔໔] ຄະຫະບໍດີ ປຽບຄື ບຸຣຸດຖືມັດຫຍ້າທີ່ໄຟໄໝ້ລຸກໂຫມຍ່າງທວນລົມໄປ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຖ້າບຸຣຸດນັ້ນ ບໍ່ຟ້າວປ່ອຍມັດຫຍ້າ ທີ່ມີໄຟໄໝ້ລຸກໂຫມນັ້ນເສຍ ມັດຫຍ້າທີ່ມີໄຟໄໝ້ລຸກໂຫມນັ້ນກໍຈະເພິ່ງໄໝ້ມື ໄໝ້ແຂນ ຫຼື ອະໄວຍະວະນ້ອຍໃຫຍ່ ສ່ວນໃດສ່ວນໜຶ່ງຂອງເຂົາເຂົາອາດເຖິງຕາຍ ຫຼື ໄດ້ຮັບທຸກປາງຕາຍ ຍ້ອນທວນໄຟນັ້ນເປັນເຫດແມ່ນບໍ?"

"ແມ່ນ ຂ້ານ້ອຍ"

"ຄະຫະບໍດີ ອະຣິຍະສາວົກກໍແນວນັ້ນຄືກັນ ເຫັນປະຈັກແຈ້ງດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຕັດກາມທັງຫລາຍວ່າ ມີອຸປະມາດ້ວຍທວນໄຟ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍໂທດໃນກາມເຫຼົ່ານັ້ນມີຢູ່ຫຼາຍຍິ່ງ" ເມື່ອເຫັນໂທດຂອງກາມນີ້ຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ແລ້ວ ຯລຯ ຈະເລີນອຸເປກຂາຯລຯ

[໔໕] ຄະຫະບໍດີ ປຽບຄືຂຸມຖ່ານໄຟມີຄວາມເລິກກວ່າ ໑ ຊົ່ວບຸຣຸດ ເຕັມດ້ວຍຖ່ານເພີງທີ່ປາສະຈາກນໍ້າ ປາສະຈາກຄວັນ ລໍາດັບນັ້ນ ບຸຣຸດຜູ້ໜຶ່ງເປັນຄົນຮັກຊີວິດ ບໍ່ຢາກຕາຍ ຮັກສຸກກຽດຊັງທຸກມາເຖິງເຂົ້າ ມີຊາຍ ໔ ຄົນເປັນຄົນແຂງແຮງຊ່ອຍກັນ ຈັບແຂນເຂົາຂ້າງລະຄົນດຶງເຂົ້າໄປສູ່ຂຸມຖ່ານໄຟ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄົນຜູ້ນັ້ນຈະເພິ່ງນ້ອມກາຍເຂົ້າໄປແນວນັ້ນ ແມ່ນບໍ"

"ບໍ່ແມ່ນ ຂ້ານ້ອຍ"
"ຂໍ້ນັ້ນຍ້ອນເຫດໃດ"

"ຍ້ອນບຸຣຸດຜູ້ນັ້ນຮູ້ວ່າ "ຖ້າເຮົາຈັກຕົກລົງໄປສູ່ຂຸມຖ່ານໄຟນີ້ ອາດເຖິງຕາຍຫຼືໄດ້ຮັບທຸກປາງຕາຍ ຍ້ອນຂຸມຖ່ານໄຟນັ້ນເປັນເຫດ" ຂ້ານ້ອຍ"

"ຄະຫະບໍດີ ອະຣິຍະສາວົກກໍແນວນັ້ນຄືກັນ ເຫັນປະຈັກແຈ້ງດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຕັດກາມທັງຫລາຍວ່າ ມີອຸປະມາດ້ວຍຂຸມຖ່ານໄຟ ມີທຸກຫຼາຍ ມີຄວາມ ຄັບແຄ້ນຫຼາຍໂທດໃນກາມເຫຼົ່ານັ້ນມີຢູ່ຫຼາຍຍິ່ງ" ເມື່ອເຫັນໂທດຂອງກາມນີ້ຕາມຄວາມ ເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ແລ້ວ ຯລຯ ຈະເລີນອຸເປກຂາຯລຯ

[໔໖] ຄະຫະບໍດີ ຄົນຝັນເຫັນສວນ ປ່າ ສະຖານທີ່ ສະໂບກຂະຣະນີ ທີ່ໜ້າອອນຊອນເຂົາຕື່ນຂຶ້ນມາກໍບໍ່ເຫັນອັນໃດເລີຍ ແມ່ນສັນໃດ ອະຣິຍະສາວົກກໍສັນນັ້ນຄືກັນ ເຫັນປະຈັກແຈ້ງດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຕັດກາມທັງຫລາຍວ່າ ມີອຸປະມາດ້ວຍຄວາມຝັນ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໂທດໃນກາມເຫຼົ່ານັ້ນມີຢູ່ຫຼາຍຍິ່ງ ຯລຯ ຈະເລີນອຸເປກຂາຯລຯ

[໔໗] ຄະຫະບໍດີ ປຽບຄືຄົນຢືມຊັບສົມບັດຄືແກ້ວມະນີແລະກຸນທົນຢ່າງດີ (ຂອງບຸກຄົນ

ອື່ນ) ນັ່ງຍານພາຫະນະໄປ ເຂົາໃສ່ໃສ່ຊັບສົມບັດທີ່ຕົນຢືມມາໄວ້ຮອບໂຕ ຍ່າງໄປລະຫວ່າງຮ້ານຄ້າໃນຕະຫລາດ ປະຊາຊົນເຫັນເຂົາແລ້ວກໍຊຸບຊິບກັນແບບນີ້ວ່າ "ຄົນນີ້ ຣວຍແທ້ ພວກຄົນຣວຍເຂົາໃຊ້ສອຍສົມບັດກັນແບບນີ້ເອງ" ພວກເຈົ້າຂອງພົບເຂົາໃນບ່ອນໃດບ່ອນໜຶ່ງເຂົ້າ ກໍຈະເພິ່ງນຳເອົາຂອງຂອງຕົນຄືນໄປໃນບ່ອນນັ້ນ ໆ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ສົມຄວນບໍ່ກັບການທີ່ຄົນຜູ້ນັ້ນບໍ່ສະແດງອາການຫວງແຫນໃນຊັບສົມບັດ"

"ສົມຄວນ ຂ້ານ້ອຍ"
"ຂໍ້ນັ້ນຍ້ອນເຫດໃດ"
"ຍ້ອນເຈົ້າຂອງ (ມີສິດ) ຈະນຳຂອງຂອງຕົນຄືນໄປ ຂ້ານ້ອຍ"

"ຄະຫະບໍດີ ອະຣິຍະສາວົກກໍແນວນັ້ນຄືກັນ ເຫັນປະຈັກແຈ້ງດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຕັດການທັງຫລາຍວ່າ ມີອຸປະມາດ້ວຍຂອງຂໍຢືມ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍໂທດໃນການເຫຼົ່ານັ້ນມີຢູ່ຫຼາຍຍິ່ງ" ຯລຯ ຈະເລີນອຸເປກຂາຯລຯ

[໔໗] ຄະຫະບໍດີ ປຽບຄື ແຄມປ່າໃຫຍ່ບໍ່ໄກຈາກໝູ່ບ້ານຫຼືນິຄົມ ຕົ້ນໄມ້ໃນແຄມປ່ານັ້ນມີໝາກດົກດາດດື່ນ ແຕ່ຍັງບໍ່ຫລົ່ນລົງມາເລີຍຈັກໜ່ອຍເລີຍ ຊາຍຄົນໜຶ່ງຜູ້ຕ້ອງການໝາກໄມ້ທ່ຽວເສາະສະແຫວງຫາໝາກໄມ້ ເຂົາມາເຖິງແຄມປ່ານັ້ນ ເຫັນຕົ້ນໄມ້ທີ່ມີໝາກດົກ ດາດດື່ນນັ້ນເຂົາຄິດແນວນີ້ວ່າ "ຕົ້ນໄມ້ນີ້ມີໝາກດົກດາດດື່ນ ແຕ່ບໍ່ມີຜົນຫລົ່ນລົງມາຈັກຜົນດຽວ ແຕ່ເຮົາຮູ້ວິທີປີນຂຶ້ນຕົ້ນໄມ້ ທາງທີ່ດີ ເຮົາຄວນປີນຂຶ້ນຕົ້ນໄມ້ນີ້ແລ້ວກິນພໍອີ່ມ ແລະ ໃສ່ພົກໃຫ້ເຕັມ" ເຂົາຈຶ່ງປີນຂຶ້ນຕົ້ນໄມ້ນັ້ນແລ້ວກິນພໍອີ່ມແລະໃສ່ພົກໃຫ້ເຕັມ ຕໍ່ມາ ຊາຍຄົນທີ່ ໒ ຕ້ອງການໝາກໄມ້ຖືຂວານທີ່ຄົມກິບທ່ຽວເສາະສະແຫວງຫາໝາກໄມ້ ເຂົາມາເຖິງແຄມປ່ານັ້ນ ເຫັນຕົ້ນໄມ້ມີໝາກດົກດາດດື່ນ ເຂົາຄິດແນວນີ້ວ່າ "ຕົ້ນໄມ້ນີ້ມີໝາກດົກດາດດື່ນ ແຕ່ບໍ່ມີຜົນຫລົ່ນ ລົງມາຈັກໜ່ອຍເລີຍ ແລະເຮົາກໍບໍ່ຮູ້ວິທີປີນຂຶ້ນຕົ້ນໄມ້ ທາງທີ່ດີ ເຮົາຄວນຈະຕັດຕົ້ນໄມ້ນີ້ທີ່ເຫງົ້າຕົ້ນ ແລ້ວກິນພໍອີ່ມແລະໃສ່ພົກໃຫ້ເຕັມ" ເຂົາຈຶ່ງຕັດຕົ້ນໄມ້ນັ້ນທີ່ເຫງົ້າຕົ້ນ ທ່ານເຂົ້າໃຈຄວາມຂໍ້ນັ້ນ ວ່າແນວໃດຊາຍຄົນທຳອິດນັ້ນທີ່ປີນຂຶ້ນຕົ້ນໄມ້ກ່ອນ ຖ້າບໍ່ຟ້າວລົງມາ ຕົ້ນໄມ້ກໍລົ້ມທັບມືຕີນ ຫຼື ອະໄວຍະວະນ້ອຍໃຫຍ່ສ່ວນໃດສ່ວນໜຶ່ງຂອງເຂົາຫັກໄດ້ ເຂົາອາດເຖິງຕາຍຫຼືໄດ້ຮັບທຸກເກືອບຕາຍ ຍ້ອນຕົ້ນໄມ້ນັ້ນເປັນເຫດແມ່ນບໍ?"

"ແມ່ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຄະຫະບໍດີ ອະຣິຍະສາວົກກໍແນວນັ້ນຄືກັນ ເຫັນປະຈັກແຈ້ງດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຕັດການທັງຫລາຍວ່າ ມີອຸປະມາດ້ວຍໝາກໄມ້ ມີທຸກຫຼາຍມີຄວາມຄັບແຄ້ນຫຼາຍ ໂທດໃນການເຫຼົ່ານັ້ນມີຢູ່ຫຼາຍຍິ່ງ" ເມື່ອເຫັນໂທດຂອງການນີ້ຕາມຄວາມເປັນຈິງ ດ້ວຍປັນຍາອັນຖືກຕ້ອງແນວນີ້ແລ້ວ ຈຶ່ງເວັ້ນອຸເປກຂາທີ່ມີອາລົມຕ່າງກັນ ທີ່ອີງອາໄສ

ອາລົມຕ່າງກັນແລ້ວ ຈະເລີນອຸເປກຂາທີ່ມີອາລົມດຽວ ທີ່ອີງອາໄສອາລົມດຽວ ເຊິ່ງເປັນທີ່ດັບບໍ່ເຫຼືອແຫ່ງຄວາມຖືໝັ້ນໂລກາມິດໂດຍປະການທັງປວງ

## ວິດຊາ ໓

[໔໙] ຄະຫະບໍດີ ອະຣິຍະສາວົກນີ້ນັ້ນແລ ອາໄສຈະຕຸດຖະຊານທີ່ມີສະຕິບໍລິສຸດຍ້ອນ ອຸເປກຂາອັນປະເສີດນີ້ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ຯລຯ໑ ທ່ານຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້

ອະຣິຍະສາວົກນີ້ນັ້ນແລ ອາໄສຈະຕຸດຖະຊານທີ່ມີສະຕິບໍລິສຸດຍ້ອນອຸເປກຂາອັນປະເສີດນີ້ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະ ເກີດບໍ່ດີ ຯລຯ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແນວນີ້ແລ

ອະຣິຍະສາວົກນີ້ນັ້ນແລ ອາໄສຈະຕຸດຖະຊານທີ່ມີສະຕິບໍລິສຸດຍ້ອນອຸເປກຂາອັນປະເສີດນີ້ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນຫາອາສະວະບໍ່ໄດ້ຍ້ອນອາສະວະທັງຫລາຍສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ຄະຫະບໍດີ ພຽງທີ່ນີ້ແລ ຊື່ວ່າ ເປັນການຕັດຂາດໂວຫານທັງໝົດ ໄດ້ຄົບຖ້ວນໂດຍປະການທັງປວງໃນອະຣິຍະວິໄນ

## ໂປຕະລິຍຄະຫະບໍດີປະກາດຕົນເປັນອຸປາສົກ

[໕໐] ຄະຫະບໍດີ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ທ່ານພິຈາລະນາເຫັນການຕັດຂາດໂວຫານເຫັນຢູ່ແນວນັ້ນໃນຕົນ ຄືການຕັດຂາດໂວຫານທັງໝົດໄດ້ຄົບຖ້ວນໂດຍປະການທັງປວງໃນອະຣິຍະວິໄນ ແມ່ນບໍ?"

ໂປຕະລິຍຄະຫະບໍດີຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງພິຈາລະນາເຫັນເຊັ່ນນັ້ນ ຈັ່ງໃດໄດ້ ຊ້ຳຂ້າພຣະອົງຍັງກັບເປັນຜູ້ໄກຈາກການຕັດຂາດໂວຫານທັງໝົດໄດ້ຄົບຖ້ວນ ໂດຍປະການທັງປວງໃນອະຣິຍະວິໄນເສຍອີກ ຍ້ອນແຕ່ກ່ອນຂ້າພຣະອົງເຂົ້າໃຈຜິດພວກອັນຍະເດຍຣະຖີ ປະຣິພາຊົກຜູ້ບໍ່ຮູ້ທົ່ວເຖິງວ່າ "ເປັນຜູ້ຮູ້ທົ່ວເຖິງ" ໄດ້ຄົບຫາພວກອັນຍະເດຍຣະຖີປະຣິພາຊົກຜູ້ບໍ່ຮູ້ທົ່ວເຖິງວ່າ "ຄົບຫາບຸກຄົນຜູ້ຮູ້ທົ່ວເຖິງ" ໄດ້ຍ້ອງຍໍພວກອັນຍະເດຍຣະຖີປະຣິພາຊົກຜູ້ບໍ່ຮູ້ທົ່ວເຖິງໄວ້ໃນຖານະແຫ່ງບຸກຄົນຜູ້ຮູ້ທົ່ວເຖິງ ແຕ່ກັບເຂົ້າໃຈພິກຂຸທັງຫລາຍຜູ້ຮູ້ທົ່ວເຖິງວ່າ "ເປັນຜູ້ບໍ່ຮູ້ທົ່ວເຖິງ" ໄດ້ຄົບຫາ ພິກຂຸທັງຫລາຍຜູ້ຮູ້ທົ່ວເຖິງວ່າ "ຄົບຫາບຸກຄົນຜູ້ບໍ່ຮູ້ທົ່ວເຖິງ" ໄດ້ຕັ້ງພິກຂຸທັງຫລາຍຜູ້ຮູ້ທົ່ວເຖິງໄວ້ໃນຖານະແຫ່ງບຸກຄົນຜູ້ບໍ່ຮູ້ທົ່ວເຖິງ ແຕ່ບັດນີ້ ຂ້າພຣະອົງຮູ້ຈັກພວກອັນຍະເດຍຣະຖີປະຣິພາຊົກຜູ້ບໍ່ຮູ້ທົ່ວເຖິງວ່າ "ເປັນຜູ້ບໍ່ຮູ້ທົ່ວເຖິງ" ຄົບຫາພວກ

ອັນຍະເດຍຣະຖີປະຣິພາຊົກຜູ້ບໍ່ຮູ້ທົ່ວເຖິງວ່າ "ຄົບຫາບຸກຄົນຜູ້ບໍ່ຮູ້ທົ່ວເຖິງ" ຕັ້ງພວກອັນຍະເດຍຣະຖີປະຣິພາຊົກຜູ້ບໍ່ຮູ້ທົ່ວເຖິງໄວ້ໃນຖານະແຫ່ງບຸກຄົນຜູ້ ບໍ່ຮູ້ທົ່ວເຖິງ ແຕ່ຮູ້ຈັກພິກຂຸທັງຫລາຍຜູ້ຮູ້ທົ່ວເຖິງວ່າ "ເປັນຜູ້ຮູ້ທົ່ວເຖິງ" ຄົບຫາພິກຂຸທັງຫລາຍຜູ້ຮູ້ ທົ່ວເຖິງວ່າ "ຄົບຫາບຸກຄົນຜູ້ຮູ້ທົ່ວເຖິງ" ຕັ້ງພິກຂຸທັງຫລາຍຜູ້ຮູ້ທົ່ວເຖິງໄວ້ໃນຖານະແຫ່ງບຸກຄົນຜູ້ຮູ້ທົ່ວເຖິງ ພຣະຜູ້ມີພຣະພາກເຈົ້າຊົງທຳຄວາມຮັກສະມະນະໃຫ້ເກີດໃນໝູ່ສະມະນະ ຊົງທຳຄວາມເຫຼື້ອມໃສ ສະມະນະໃຫ້ເກີດໃນໝູ່ສະມະນະ ຊົງທຳຄວາມເຄົາລົບສະມະນະໃຫ້ເກີດໃນໝູ່ສະມະນະ ແກ່ຂ້າພຣະອົງແລ້ວນໍ

ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫລົງທາງ ຫຼື ເຍືອງໄຟໃນບ່ອນມືດ ດ້ວຍຕັ້ງໃຈວ່າ "ຄົນມີ ຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳແລະ ພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" ດັ່ງນີ້ແລ

**ໂປຕະລິຍະສູດທີ່ ໔ ຈົບ**

# ໕. ຊີວະກະສູດ

## ວ່າດ້ວຍໝໍຊີວົກໂກມາຣະພັດ

[໕໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ສວນໝາກມ່ວງຂອງໝໍຊີວົກໂກມາຣະພັດເຂດນະຄອນຣາດຊະຄຶ ຄັ້ງນັ້ນແລ ໝໍຊີວົກໂກມາຣະພັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຟັງມາແນວນີ້ວ່າ "ຊົນທັງຫລາຍຂ້າສັດ ເຈາະຈົງຖວາຍພຣະສະມະນະໂຄດົມ ພຣະສະມະນະໂຄດົມກໍຊົງຮູ້ການນັ້ນ ແຕ່ກໍຍັງສະເຫວີຍຊີ້ນທີ່ເຂົາຂ້າເຈາະຈົງພຣະອົງ ທີ່ເຂົາອາໄສພຣະອົງເຮັດ"

ຂ້າແດ່ ພຣະອົງຜູ້ຈະເລີນ ຊົນເຫຼົ່າໃດກ່າວແນວນີ້ວ່າ "ຊົນທັງຫລາຍຂ້າສັດເຈາະຈົງຖວາຍພຣະສະມະນະໂຄດົມ ພຣະສະມະນະໂຄດົມກໍຊົງຮູ້ການນັ້ນ ແຕ່ກໍຍັງສະເຫວີຍຊີ້ນທີ່ເຂົາ

ຂ້າເຈາະຈົງພຣະອົງ ທີ່ເຂົາອາໄສພຣະອົງເຮັດ" ຊົນເຫຼົ່ານັ້ນ ຈະຊື່ວ່າເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳຕົວະຫຼື ຊື່ວ່າກ່າວແກ້ແນວສົມເຫດສົມຜົນ ຫຼື ບໍ່ມີແດ່ຫຼືທີ່ຄຳກ່າວເຊັ່ນນັ້ນແລະຄຳທີ່ກ່າວຕໍ່ ໆ ກັນມາ ຈະເປັນເຫດໃຫ້ຖືກຕຳໜິໄດ້"

## ຊີ້ນທີ່ຄວນສັນແລະບໍ່ຄວນສັນ

[໕໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຊີວົກ ຊົນເຫຼົ່າໃດກ່າວແນວນີ້ວ່າ "ຊົນທັງຫລາຍຂ້າສັດເຈາະຈົງຖວາຍພຣະສະມະນະໂຄດົມ ພຣະສະມະນະໂຄດົມກໍຊົງຮູ້ການນັ້ນ ແຕ່ກໍຍັງສະເຫວີຍຊີ້ນທີ່ເຂົາຂ້າເຈາະຈົງພຣະອົງ ທີ່ເຂົາອາໄສພຣະອົງເຮັດ" ຊົນເຫຼົ່ານັ້ນບໍ່ຊື່ວ່າເວົ້າກົງຕາມທີ່ເຮົາກ່າວໄວ້ ແຕ່ຊື່ວ່າກ່າວຕູ່ເຮົາດ້ວຍຄຳຕົວະ ທີ່ບໍ່ມີຢູ່

ເຮົາກ່າວຊີ້ນທີ່ພິກຂຸບໍ່ຄວນສັນໄວ້ດ້ວຍເຫດ ໓ ປະການ ຄື

໑. ຊີ້ນທີ່ຕົນເຫັນ
໒. ຊີ້ນທີ່ຕົນໄດ້ຍິນ
໓. ຊີ້ນທີ່ຕົນສົງໄສ

ເຮົາກ່າວຊີ້ນທີ່ພິກຂຸບໍ່ຄວນສັນໄວ້ດ້ວຍເຫດ ໓ ປະການນີ້ແລ

ເຮົາກ່າວຊີ້ນທີ່ພິກຂຸຄວນສັນໄວ້ດ້ວຍເຫດ ໓ ປະການ ຄື

໑. ຊີ້ນທີ່ຕົນບໍ່ເຫັນ
໒. ຊີ້ນທີ່ຕົນບໍ່ໄດ້ຍິນ
໓. ຊີ້ນທີ່ຕົນບໍ່ສົງໄສ

ຊີວົກ ເຮົາກ່າວຊີ້ນທີ່ພິກຂຸຄວນສັນໄວ້ດ້ວຍເຫດ ໓ ປະການນີ້ແລ

## ການແຜ່ເມດຕາ

[໕໓] ຊີວົກ ພິກຂຸໃນທຳວິໄນນີ້ ອາໄສເຮືອນຫຼືນິຄົມແຫ່ງໃດແຫ່ງໜຶ່ງຢູ່ ທ່ານ ມີເມດຕາຈິດແຜ່ໄປຕະຫຼອດທິດທີ່ ໑ ຢູ່ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນບ່ອນທຸກສະຖານ ດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ດ້ວຍປະການແນວນີ້ ຄະຫະບໍດີ ຫຼື ບຸດຄະຫະບໍດີເຂົ້າໄປຫາທ່ານແລ້ວນິມົນເພື່ອສັນພັດຕາຫານໃນມື້ຮຸ່ງຂຶ້ນ ເມື່ອພິກຂຸຕ້ອງການຈຶ່ງຮັບນິມົນ ເມື່ອຜ່ານຄືນນັ້ນໄປ ໃນເວລາເຊົ້າ ທ່ານຄອງອັນຕະຣະວາສົກ ຖືບາ

ດແລະຈີວອນເຂົ້າໄປສູ່ທີ່ຢູ່ຂອງຄະຫະບໍດີ ຫຼື ບຸດຄະຫະບໍດີ ນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ ຄະຫະບໍດີຫຼືບຸດຄະຫະບໍດີນັ້ນອັງຄາດທ່ານດ້ວຍບິນທະບາດອັນປະນີດ ທ່ານບໍ່ຄິດແນວນີ້ວ່າ "ດີແທ້ ຄະຫະບໍດີ ຫຼື ບຸດຄະຫະບໍດີນີ້ ເພິ່ງອັງຄາດເຮົາດ້ວຍບິນທະບາດອັນປະນີດ" ທັງບໍ່ຄິດແນວນີ້ວ່າ "ເຮັດແນວໃດນໍ ຄະຫະບໍດີ ຫຼື ບຸດຄະຫະບໍດີຈຶ່ງຈະອັງຄາດເຮົາດ້ວຍບິນທະບາດ ອັນປະນີດແນວນີ້ຕະຫຼອດໄປ" ທ່ານບໍ່ກຳໜັດ ບໍ່ຍິນດີ ບໍ່ຟ້າວສັນບິນທະບາດນັ້ນ ມີປົກກະຕິເຫັນໂທດ ມີປັນຍາເຄື່ອງສະບັດອອກຈາກທຸກ ສັນຢູ່

ຊີວົກ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໃນສະໄໝນັ້ນ ພິກຂຸນັ້ນຍ່ອມຄິດເພື່ອບຽດບຽນ ຕົນແດ່ ເພື່ອບຽດບຽນຜູ້ອື່ນແດ່ ຫຼື ເພື່ອບຽດບຽນທັງ ໒ ຝ່າຍແດ່ບໍ?"

"ບໍ່ ຂ້ານ້ອຍ"

"ໃນເວລານັ້ນ ພິກຂຸນັ້ນ ຊື່ວ່າສັນອາຫານອັນບໍ່ມີໂທດເລີຍ ແມ່ນບໍ?"

"ແມ່ນ ຂ້ານ້ອຍ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນມາແລ້ວວ່າ "ພົມມີປົກກະຕິຢູ່ດ້ວຍເມດຕາ" ຄຳກ່າວທີ່ພຽງໄດ້ຍິນມານີ້ຂ້າພຣະອົງເຫັນວ່າ ພຣະຜູ້ມີພຣະພາກເຈົ້າຊົງເປັນພະຍານໄດ້ ຍ້ອນພຣະຜູ້ມີພຣະພາກເຈົ້າເອງກໍຊົງມີປົກກະຕິຢູ່ດ້ວຍເມດຕາ"

"ຊີວົກ ບຸກຄົນຈະເພິ່ງມີຄວາມພະຍາບາດຍ້ອນຣາຄະ ໂທສະ ໂມຫະໃດ ຣາຄະ ໂທສະ ໂມຫະນັ້ນ ຕະຖາຄົດລະໄດ້ແລ້ວ ຕັດຮາກຖອນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກຖອນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຊີວົກ ຫາກທ່ານກ່າວໝາຍເຖິງການລະຣາຄະ ໂທສະ ໂມຫະນີ້ ເຮົາເຫັນດ້ວຍ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງກ່າວໝາຍເຖິງການລະຣາຄະ ໂທສະ ໂມຫະ ນີ້ແລ ຂ້ານ້ອຍ"

## ການແຜ່ກະລຸນາ ມຸທິຕາ ແລະອຸເປກຂາ

[໕໔] "ຊີວົກ ພິກຂຸໃນທຳວິໄນນີ້ ອາໄສເຮືອນຫຼືນິຄົມແຫ່ງໃດແຫ່ງໜຶ່ງຢູ່ ທ່ານມີກະລຸນາຈິດ ຯລຯ ມີມຸທິຕາຈິດ ຯລຯ ມີອຸເປກຂາຈິດ ແຜ່ໄປຕະຫຼອດທິດທີ່ ໑ ຢູ່ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນບ່ອນທຸກສະຖານ ດ້ວຍອຸເປກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ດ້ວຍປະການແນວນີ້ ຄະຫະບໍດີຫຼືບຸດຄະຫະບໍດີເຂົ້າໄປຫາທ່ານແລ້ວນິມົນເພື່ອສັນພັດຕາຫານໃນມື້ຮຸ່ງຂຶ້ນ ເມື່ອພິກຂຸຕ້ອງການຈຶ່ງຮັບນິມົນ ເມື່ອຜ່ານຄືນນັ້ນໄປ ໃນເວລາເຊົ້າທ່ານ ຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປສູ່ທີ່ຢູ່ຂອງຄະຫະບໍດີ ຫຼື ບຸດ

ຄະຫະບໍດີນັ່ງເທິງອາສະນະທີ່ເຂົາປູລາດໄວ້ແລ້ວ ຄະຫະບໍດີຫຼືບຸດຄະຫະບໍດີອັງຄາດທ່ານດ້ວຍບິນທະບາດອັນປະນີດ ທ່ານບໍ່ຄິດແນວນີ້ວ່າ "ດີແທ້ ຄະຫະບໍດີ ຫຼື ບຸດຄະຫະບໍດີນີ້ເພິ່ງອັງຄາດເຮົາດ້ວຍບິນທະບາດອັນປະນີດ" ທັງບໍ່ຄິດແນວນີ້ວ່າ "ເຮັດແນວໃດນໍ ຄະຫະບໍດີ ຫຼື ບຸດຄະຫະບໍດີຈຶ່ງຈະອັງ ຄາດເຮົາດ້ວຍບິນທະບາດອັນປະນີດ ແນວນີ້ຕະຫຼອດໄປ" ທ່ານບໍ່ກຳໜັດ ບໍ່ຍິນດີບໍ່ຟ້າວສັນບິນທະບາດນັ້ນ ມີປົກກະຕິເຫັນໂທດ ມີປັນຍາເຄື່ອງສະບັດອອກຈາກທຸກ ສັນຢູ່

ຊີວົກ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໃນສະໄໝນັ້ນ ພິກຂຸນັ້ນຍ່ອມຄິດເພື່ອບຽດບຽນ ຕົນແດ່ ເພື່ອບຽດບຽນຜູ້ອື່ນ ຫຼືບຽດບຽນທັງ ໒ ຝ່າຍບໍ?"

"ບໍ່ ຂ້ານ້ອຍ"

"ໃນເວລານັ້ນ ພິກຂຸນັ້ນຊື່ວ່າ ສັນອາຫານອັນບໍ່ມີໂທດເລີຍ ແມ່ນບໍ?"

"ແມ່ນ ຂ້ານ້ອຍ ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນມາແລ້ວວ່າ "ພົມມີປົກກະຕິຢູ່ດ້ວຍອຸເປກຂາ" ຄຳກ່າວທີ່ພຽງໄດ້ຍິນມານີ້ຂ້າພຣະອົງເຫັນວ່າ ພຣະຜູ້ມີພຣະພາກເຈົ້າຊົງເປັນພະຍານໄດ້ ຍ້ອນພຣະຜູ້ມີພຣະພາກເຈົ້າເອງກໍຊົງມີປົກກະຕິຢູ່ດ້ວຍອຸເປກຂາ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຊີວົກ ບຸກຄົນຈະເພິ່ງມີຄວາມບຽດບຽນ ມີຄວາມບໍ່ຍິນດີມີຄວາມກະທົບ ຍ້ອນຣາຄະ ໂທສະ ໂມຫະໃດ ຣາຄະ ໂທສະ ໂມຫະນັ້ນ ຕະຖາຄົດລະໄດ້ແລ້ວ ຕັດຮາກຖອນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກຖອນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີເກີດຂຶ້ນຕໍ່ໄປບໍ່ໄດ້ ຊີວົກ ຫາກທ່ານກ່າວໝາຍເຖິງການລະຣາຄະ ໂທສະ ໂມຫະນີ້ ເຮົາເຫັນດ້ວຍ"

ໝໍຊີວົກໂກມາຣະພັດຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງກ່າວໝາຍເຖິງການລະຣາຄະ ໂທສະ ໂມຫະນີ້ແລ ຂ້ານ້ອຍ"

## ທຳບຸນໄດ້ບາບດ້ວຍເຫດ ໕ ປະການ

[໕໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຊີວົກ ເຫດໃຫ້ປະສົບສິ່ງທີ່ບໍ່ເປັນບຸນ ໕ ປະການຂອງບຸກຄົນຜູ້ຂ້າສັດ ເຈາະຈົງຖວາຍຕະຖາຄົດ ຫຼື ສາວົກຂອງຕະຖາຄົດ ຄື

໑. ການທີ່ເຂົາກ່າວແນວນີ້ວ່າ "ພວກທ່ານຈົ່ງໄປນຳສັດຊະນິດນັ້ນມາ" ນີ້ເປັນເຫດໃຫ້ປະສົບສິ່ງທີ່ບໍ່ເປັນບຸນເປັນຈຳນວນຫລາຍປະການທີ ໑

໒. ການທີ່ສັດນັ້ນໄດ້ຮັບທຸກໂທມະນັດຂະນະຖືກມັດຄໍນຳມາ ນີ້ເປັນເຫດໃຫ້ປະສົບສິ່ງທີ່ບໍ່ເປັນບຸນເປັນຈຳນວນຫລາຍປະການທີ ໒

໓. ການທີ່ເຂົາກ່າວແນວນີ້ວ່າ "ພວກທ່ານຈົ່ງໄປຂ້າສັດຊະນິດນີ້" ນີ້ເປັນເຫດໃຫ້ປະສົບສິ່ງທີ່ບໍ່ເປັນບຸນເປັນຈຳນວນຫລາຍປະການທີ ໓

໔. ການທີ່ສັດນັ້ນໄດ້ຮັບທຸກໂທມະນັດຂະນະຖືກຂ້າ ນີ້ເປັນເຫດໃຫ້ປະສົບສິ່ງທີ່ບໍ່ເປັນບຸນເປັນຈຳນວນຫລາຍປະການທີ ໔

໕. ການທີ່ເຂົາເຮັດໃຫ້ຕະຖາຄົດ ຫຼື ສາວົກຂອງຕະຖາຄົດຍິນດີດ້ວຍຊີ້ນທີ່ບໍ່ສົມຄວນ ນີ້ເປັນເຫດໃຫ້ປະສົບສິ່ງທີ່ບໍ່ເປັນບຸນເປັນຈຳນວນຫລາຍປະການທີ ໕

ຊີວົກ ເຫດໃຫ້ປະສົບສິ່ງທີ່ບໍ່ເປັນບຸນເປັນຈຳນວນຫລາຍ ໕ ປະການນີ້ແລ ຂອງບຸກຄົນຜູ້ຂ້າສັດເຈາະຈົງຖວາຍຕະຖາຄົດຫຼືສາວົກຂອງຕະຖາຄົດ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ໝໍຊີວົກໂກມາຣະພັດຈຶ່ງຂາບທູນວ່າ "ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ຂ້ານ້ອຍ ພິກຂຸທັງຫລາຍ ສັນສະເພາະພັດຕາຫານທີ່ສົມຄວນ ພິກຂຸທັງຫລາຍ ສັນສະເພາະອາຫານທີ່ບໍ່ມີໂທດ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫລົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈື່ ຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" ດັ່ງນີ້ແລ

**ຊີວົກສູດທີ່ ໕ ຈົບ**

# ໖. ອຸປາລິວາທະສູດ

## ວ່າດ້ວຍວາທະຂອງຄະຫະບໍດີຊື່ອຸບາລິ

[໕໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ປາວາຣິກຳພະວັນ ເຂດເມືອງນາລັນທາ ສະໄໝນັ້ນແລ ນິຄົນ ນາຕະບຸດພ້ອມກັບບໍລິສັດນິຄົນເປັນຈຳນວນຫຼາຍ ອາໄສຢູ່ທີ່ເມືອງນາລັນທາ ຕໍ່ມາ ນິຄົນຊື່ທີຄະຕະປັດສີ ອອກທ່ຽວຫາອາຫານໃນເມືອງນາລັນທາ ກັບຈາກທ່ຽວຫາອາ

ຫານພາຍຫລັງເວລາອາຫານແລ້ວ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງປາວາຣິກຳພະວັນ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ໄດ້ຢືນຢູ່ທີ່ທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບນິຄົນຊື່ທີຄະຕະປັດສີເຊິ່ງຢືນຢູ່ ທີ່ນັ້ນແລວ່າ "ຕະປັດສີ ທີ່ນັ່ງມີຢູ່ຖ້າທ່ານປະສົງ ກໍຈົ່ງນັ່ງເທີ້ນ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ນິຄົນຊື່ທີຄະຕະປັດສີຈຶ່ງເລືອກນັ່ງຢູ່ບ່ອນທີ່ສົມຄວນ ທີ່ໃດທີ່ໜຶ່ງເຊິ່ງຕ່ຳກວ່າປຽບທຽບທັນດະ ໓ ກັບກຳ ໓

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມນິຄົນຊື່ທີຄະຕະປັດສີວ່າ "ຕະປັດສີ ນິຄົນ ນາຕະບຸດບັນຍັດກຳໃນການເຮັດກຳຊົ່ວ ໃນການປະພຶດຕິກຳຊົ່ວໄວ້ທີ່ໃດ?"

ນິຄົນຊື່ທີຄະຕະປັດສີທູນຕອບວ່າ "ທ່ານພຣະໂຄດົມ ນິຄົນ ນາຕະບຸດບໍ່ໄດ້ບັນຍັດເປັນອາຈິນວ່າ "ກຳ ກຳ" ແຕ່ບັນຍັດເປັນອາຈິນວ່າ "ທັນດະ ທັນດະ"

"ຕະປັດສີ ນິຄົນ ນາຕະບຸດບັນຍັດທັນດະໃນການເຮັດກຳຊົ່ວ ໃນການປະພຶດຕິກຳຊົ່ວໄວ້ທີ່ໃດ?"

"ທ່ານພຣະໂຄດົມ ນິຄົນ ນາຕະບຸດບັນຍັດທັນດະໃນການເຮັດກຳຊົ່ວ ໃນການປະພຶດຕິກຳຊົ່ວໄວ້ ໓ ປະການ ຄື (໑) ກາຍທັນດະ (໒) ວະຈີທັນດະ (໓) ມະໂນທັນດະ"

"ຕະປັດສີ ກາຍທັນດະແນວໜຶ່ງ ວະຈີທັນດະແນວໜຶ່ງ ມະໂນທັນດະແນວໜຶ່ງແມ່ນບໍ?"

"ທ່ານພຣະໂຄດົມ ກາຍທັນດະກໍແນວໜຶ່ງ ວະຈີທັນດະກໍແນວໜຶ່ງ ມະໂນທັນດະ ກໍແນວໜຶ່ງ"

"ຕະປັດສີ ບັນດາທັນດະທັງ ໓ ປະການນີ້ທີ່ຈຳແນກແຍກເປັນແນວນີ້ ຄື (໑) ກາຍທັນດະ (໒) ວະຈີທັນດະ (໓) ມະໂນທັນດະ ນິຄົນ ນາຕະບຸດບັນຍັດທັນດະໃດວ່າ ມີໂທດຫລາຍກວ່າກັນ ໃນການເຮັດກຳຊົ່ວ ໃນການປະພຶດກຳຊົ່ວ"

"ທ່ານພຣະໂຄດົມ ບັນດາທັນດະທັງ ໓ ປະການ ທີ່ຈຳແນກແຍກເປັນແນວນີ້ ນິຄົນນາຕະບຸດບັນຍັດກາຍທັນດະວ່າ ມີໂທດຫລາຍກວ່າກັນ ໃນການເຮັດກຳຊົ່ວ ໃນການປະພຶດກຳຊົ່ວ ບໍ່ແມ່ນວະຈີທັນດະ ຫຼື ມະໂນທັນດະ"

"ຕະປັດສີ ທ່ານຕອບວ່າ "ກາຍທັນດະ" ບໍ?"
"ທ່ານພຣະໂຄດົມ ຂ້າພຣະອົງທູນຕອບວ່າ "ກາຍທັນດະ"
"ຕະປັດສີ ທ່ານຕອບວ່າ "ກາຍທັນດະ" ບໍ?"

"ທ່ານພຣະໂຄດົມ ຂ້າພຣະອົງທູນຕອບວ່າ "ກາຍທັນດະ"
"ຕະປັດສີ ທ່ານຕອບວ່າ "ກາຍທັນດະ" ບໍ?"
"ທ່ານພຣະໂຄດົມ ຂ້າພຣະອົງທູນຕອບວ່າ "ກາຍທັນດະ"

ພຣະຜູ້ມີພຣະພາກເຈົ້າຊົງໃຫ້ນິຄົນຊື່ ທີຄະຕະປັດສີຢັ້ງຢືນຄຳເວົ້ານີ້ເຖິງ ໓ ຄັ້ງ ດ້ວຍປະການແນວນີ້

[໕໗] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ນິຄົນຊື່ທີຄະຕະປັດສີຈຶ່ງໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ທ່ານພຣະໂຄດົມ ພຣະອົງຊົງບັນຍັດທັນດະໃນການເຮັດກຳຊົ່ວໃນການປະພຶດຕິກຳຊົ່ວໄວ້ທີ່ໃດ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ຕະປັດສີ ຕະຖາຄົດບໍ່ໄດ້ບັນຍັດເປັນອາຈິນວ່າ "ທັນດະ ທັນດະ" ແຕ່ບັນຍັດເປັນອາຈິນວ່າ "ກຳ ກຳ"

"ທ່ານພຣະໂຄດົມ ພຣະອົງຊົງບັນຍັດກຳໃນການເຮັດກຳຊົ່ວ ໃນການປະພຶດຕິກຳຊົ່ວໄວ້ທີ່ໃດ?"

"ຕະປັດສີ ເຮົາບັນຍັດກຳໃນການເຮັດກຳຊົ່ວ ໃນການປະພຶດຕິກຳຊົ່ວໄວ້ ໓ ປະການ ຄື (໑) ກາຍຍະກຳ (໒) ວະຈີກຳ (໓) ມະໂນກຳ"

"ທ່ານພຣະໂຄດົມ ກາຍຍະກຳແນວໜຶ່ງ ວະຈີກຳແນວໜຶ່ງ ມະໂນກຳແນວໜຶ່ງທີ່ນັ້ນບໍ?"

"ຕະປັດສີ ກາຍຍະກຳກໍແນວໜຶ່ງ ວະຈີກຳກໍແນວໜຶ່ງ ມະໂນກຳກໍແນວໜຶ່ງ ທີ່ນັ້ນ"

"ທ່ານພຣະໂຄດົມ ບັນດາກຳທັງ ໓ ປະການນີ້ທີ່ຈຳແນກແຍກເປັນແນວນີ້ ຄື (໑) ກາຍຍະກຳ (໒) ວະຈີກຳ (໓) ມະໂນກຳ ພຣະອົງຊົງບັນຍັດກຳໃດວ່າ ມີໂທດຫລາຍກວ່າກັນໃນການເຮັດກຳຊົ່ວ ໃນການປະພຶດຕິກຳຊົ່ວ"

"ຕະປັດສີ ບັນດາກຳທັງ ໓ ປະການທີ່ຈຳແນກແຍກເປັນແນວນີ້ ເຮົາບັນຍັດ ມະໂນກຳວ່າມີໂທດຫລາຍກວ່າ ໃນການເຮັດກຳຊົ່ວ ໃນການປະພຶດຕິກຳຊົ່ວ ບໍ່ແມ່ນກາຍຍະກຳຫຼືວະຈີກຳ"

"ທ່ານພຣະໂຄດົມ ພຣະອົງຕັດຕອບວ່າ "ມະໂນກຳ" ບໍ?"
"ແມ່ນ ເຮົາຕອບວ່າ "ມະໂນກຳ"
"ທ່ານພຣະໂຄດົມ ພຣະອົງຕັດຕອບວ່າ "ມະໂນກຳ" ບໍ?"
"ແມ່ນ ເຮົາຕອບວ່າ "ມະໂນກຳ"

"ທ່ານພຣະໂຄດົມ ພຣະອົງຕັດຕອບວ່າ "ມະໂນກຳ" ບໍ?"

"ແມ່ນ ເຮົາຕອບວ່າ "ມະໂນກຳ"

ນິຄົນຊື່ທີຄະຕະປັດສີໃຫ້ພຣະຜູ້ມີພຣະພາກເຈົ້າຊົງຢັ້ງຢືນໃນພຣະດຳຣັດນີ້ເຖິງ ໓ ຄັ້ງ ດ້ວຍປະການແນວນີ້ ແລ້ວລຸກຈາກອາສະນະເຂົ້າໄປຫານິຄົນ ນາຕະບຸດຮອດບ່ອນຢູ່

## ອຸບາລີອາສາໂຕ້ວາທະກັບພຣະພຸດທະເຈົ້າ

[໕໗] ສະໄໝນັ້ນ ນິຄົນ ນາຕະບຸດນັ່ງຢູ່ກັບບໍລິສັດຄະ ຫຼື ຫັດເປັນຈຳນວນຫຼາຍ ເຊິ່ງເປັນກຸ່ມຊາວບ້ານພາລະກະ ມີຄະຫະບໍດີຊື່ອຸບາລີເປັນຫົວໜ້າ ໄດ້ເຫັນນິຄົນຊື່ທີຄະຕະປັດສີຍ່າງມາແຕ່ໄກ ຈຶ່ງທັກທາຍວ່າ "ຕະປັດສີ ເຊີນທາງນີ້ ທ່ານມາຈາກໃສແຕ່ເວັນແທ້"

ທີຄະຕະປັດສີຕອບວ່າ "ຜົມມາຈາກສຳນັກຂອງພຣະສະມະນະໂຄດົມນີ້ເອງ ຂ້ານ້ອຍ"

"ທ່ານໄດ້ສົນທະນາປາໄສກັບພຣະສະມະນະໂຄດົມແດ່ບໍ?"

"ກໍໄດ້ສົນທະນາປາໄສແດ່ ຂ້ານ້ອຍ"

"ສົນທະນາປາໄສກັນເຖິງເລື້ອງອັນໃດນໍ?"

ຈາກນັ້ນ ນິຄົນຊື່ທີຄະຕະປັດສີໄດ້ເລົ່າເລື້ອງທີ່ສົນທະນາປາໄສກັບພຣະຜູ້ມີພຣະພາກເຈົ້າໃຫ້ນິຄົນ ນາຕະບຸດຟັງທັງໝົດ ເມື່ອນິຄົນຊື່ທີຄະຕະປັດສີເລົ່າຈົບ ນິຄົນ ນາຕະບຸດ ຈຶ່ງກ່າວວ່າ

"ດີແລ້ວ ດີແລ້ວ ຕະປັດສີ ການທີ່ທ່ານທີຄະຕະປັດສີຊີ້ແຈ່ງໃຫ້ພຣະສະມະນະໂຄດົມຟັງນັ້ນ ກົງຕາມທີ່ສາວົກຜູ້ໄດ້ສຶກສາຈົບຮູ້ທົ່ວເຖິງຄຳສອນຂອງສາດສະດາແນວຖືກຕ້ອງຊີ້ແຈ່ງໄວ້ ມະໂນທັນດະອັນຕ່ຳຊາມຈະດີງາມໄດ້ແນວໃດ ເມື່ອທຽບກັບກາຍທັນດະທີ່ສຳຄັນແນວນີ້ ແທ້ຈິງໃນການເຮັດກຳຊົ່ວ ໃນການປະພຶດຕິກຳຊົ່ວ ກາຍທັນດະທີ່ນັ້ນມີໂທດຫລາຍກວ່າ ບໍ່ແມ່ນວະຈີທັນດະ ຫຼື ມະໂນທັນດະເລີຍ"

[໕໘] ເມື່ອນິຄົນ ນາຕະບຸດກ່າວແນວນີ້ແລ້ວ ອຸບາລີຄະຫະບໍດີໄດ້ກ່າວກັບນິຄົນ ນາຕະບຸດວ່າ "ດີແລ້ວ ດີແລ້ວ ທ່ານຜູ້ຈະເລີນ ທ່ານທີຄະຕະປັດສີຊີ້ແຈ່ງດີແລ້ວ ຖືກຕ້ອງແລ້ວ ການທີ່ທ່ານທີຄະຕະປັດສີຊີ້ແຈ່ງໃຫ້ພຣະສະມະນະໂຄດົມຟັງນັ້ນ ກົງຕາມທີ່ສາວົກຜູ້ໄດ້ສຶກສາຈົບຮູ້ ທົ່ວເຖິງຄຳສອນຂອງສາດສະດາແນວຖືກຕ້ອງຊີ້ແຈ່ງໄວ້ ມະໂນທັນດະອັນຕ່ຳຊາມຈະດີງາມໄດ້ແນວໃດ ເມື່ອທຽບກັບກາຍທັນດະທີ່ສຳຄັນແນວນີ້ ແທ້ຈິງໃນການເຮັດກຳຊົ່ວ ໃນການປະພຶດຕິກຳຊົ່ວ ກາຍທັນດະທີ່ນັ້ນຍ່ອມມີໂທດຫລາຍກວ່າ ບໍ່ແມ່ນວະຈີທັນດະ ຫຼືມະໂນທັນດະເລີຍ

ທ່ານຜູ້ຈະເລີນ ຖ້າຈັ່ງຊັ້ນ ຂ້າພະເຈົ້າຈະໄປໂຕ້ວາທະໃນເລື້ອງນີ້ກັບພຣະສະມະນະໂຄດົມເອງ ຖ້າພຣະສະມະນະໂຄດົມຈັກຢັ້ງຢືນ ຄື ແນວທີ່ທ່ານຕະປັດສີຢັ້ງຢືນໄວ້ແນວນັ້ນ ຂ້າພະເຈົ້າຈັກເວົ້າໂຮບອົບໄປວກມາຫວ່ານລ້ອມໃຫ້ງົງ ປຽບຄືຄົນທີ່ແຂງແຮງຈັບຂົນແກະທີ່ມີຂົນຍາວດຶງດຶງໄປດຶງມາໝຸນຈົນງົງ ຫຼື ປຽບຄືຊາຍສະກັນຜູ້ເປັນກຳມະກອນໃນໂຮງງານສຸຣາ ຖິ້ມເປົາທີ່ມີສ່ວນປະສົມສຸຣາໃບໃຫຍ່ລົງໃນອ່າງໝັກສ່າທີ່ເລິກ ແລ້ວຈັບທີ່ແຈສ່າຍໄປສ່າຍມາສະບັດອອກ ຂ້າພະເຈົ້າຈັກກຳຈັດບົດ ຍ່ອງເຊິ່ງວາທະຂອງພຣະສະມະນະໂຄດົມດ້ວຍວາທະ ຄື ຄົນທີ່ແຂງແຮງເປັນນັກເລງສຸຣາ ຈັບໄຫສຸຣາຂວ້ຳລົງ ຫງາຍຂຶ້ນ ສັ່ນຈົນນ້ຳສຸຣາ ສະເດັດ ຫຼື ຂ້າພະເຈົ້າຈັກຫລິ້ນກີລາດຶງເຊືອກປໍປ່ານກັບພຣະສະມະນະໂຄດົມ ຄື ຊ້າງແກ່ອາຍຸ ໖໐ ປີ ລົງໄປສູ່ສະນິກຫລິ້ນກີລາດຶງເຊືອກປໍປ່ານ

ທ່ານຜູ້ຈະເລີນ ຖ້າຈັ່ງຊັ້ນ ຂ້າພະເຈົ້າຈະໄປ ຈັກໂຕ້ວາທະໃນເລື້ອງທີ່ເວົ້າກັນນີ້ກັບພຣະສະມະໜະໂຄດົມເອງ”

“ຄະຫະບໍດີ ທ່ານຈົ່ງໄປ ຈົ່ງໂຕ້ວາທະໃນເລື້ອງທີ່ເວົ້າກັນນີ້ກັບພຣະສະມະນະໂຄດົມ ແທ້ຈິງ ເຮົາກໍໄດ້ ທີຄະຕະປັດສີກໍໄດ້ ຫຼື ທ່ານກໍໄດ້ ຄວນໂຕ້ວາທະກັບພຣະສະມະນະໂຄດົມ”

[໖໐] ເມື່ອນິຄົນ ນາຕະບຸດກ່າວແນວນີ້ແລ້ວ ນິຄົນຊື່ທີຄະຕະປັດສີໄດ້ກ່າວກັບນິຄົນນາຕະບຸດວ່າ “ທ່ານຜູ້ຈະເລີນ ການທີ່ອຸບາລີຄະຫະບໍດີຈະເພິ່ງໂຕ້ວາທະກັບພຣະ ສະມະໜະໂຄດົມນັ້ນ ຂ້າພະເຈົ້າບໍ່ພໍໃຈເລີຍ ຍ້ອນພຣະສະມະນະໂຄດົມເປັນຄົນມີມານຍາ ຮູ້ມາຍາເປັນເຄື່ອງກັບໃຈພວກສາວົກຂອງອັນຍະເດຍຣະຖີໄດ້”

ນິຄົນ ນາຕະບຸດ ກ່າວວ່າ “ຕະປັດສີ ເປັນໄປບໍ່ໄດ້ເລີຍທີ່ອຸບາລີຄະຫະບໍດີຈະເພິ່ງເປັນສາວົກຂອງພຣະສະມະນະໂຄດົມ ແຕ່ເປັນໄປໄດ້ທີ່ພຣະສະມະນະໂຄດົມຈະເພິ່ງເປັນສາວົກຂອງອຸບາລີຄະຫະບໍດີ

ຄະຫະບໍດີ ທ່ານຈົ່ງໄປ ຈົ່ງໂຕ້ວາທະໃນເລື້ອງທີ່ເວົ້າກັນນີ້ກັບພຣະສະມະນະໂຄດົມ ແທ້ຈິງເຮົາກໍໄດ້ ທີຄະຕະປັດສີກໍໄດ້ ຫຼື ທ່ານກໍໄດ້ ຄວນໂຕ້ວາທະກັບພຣະສະມະນະໂຄດົມ”

ແມ່ນເທື່ອທີ ໔ ນິຄົນຊື່ທີຄະຕະປັດສີກໍໄດ້ເຕືອນນິຄົນ ນາຕະບຸດວ່າ “ທ່ານຜູ້ຈະເລີນ ການທີ່ອຸບາລີຄະຫະບໍດີຈະເພິ່ງໂຕ້ວາທະກັບພຣະສະມະນະໂຄດົມນັ້ນ ຂ້າພະເຈົ້າບໍ່ພໍໃຈເລີຍ ຍ້ອນພຣະສະມະນະໂຄດົມເປັນຄົນມີມານຍາ ຮູ້ມາຍາເປັນເຄື່ອງກັບໃຈພວກສາວົກຂອງອັນຍະເດຍຣະຖີໄດ້”

ນິຄົນ ນາຕະບຸດ ກ່າວວ່າ “ຕະປັດສີ ເປັນໄປບໍ່ໄດ້ເລີຍທີ່ອຸບາລີຄະຫະບໍດີຈະເພິ່ງ ເປັນ

ສາວົກຂອງພຣະສະມະນະໂຄດົມ ແຕ່ເປັນໄປໄດ້ທີ່ພຣະສະມະນະໂຄດົມຈະເພິ່ງເປັນສາວົກຂອງອຸບາລີຄະຫະບໍດີ

ຄະຫະບໍດີ ທ່ານຈົ່ງໄປ ຈົ່ງໂຕ້ວາທະໃນເລື້ອງທີ່ເວົ້າກັນນີ້ກັບພຣະສະມະນະໂຄດົມ ແທ້ຈິງ ເຮົາກໍໄດ້ ທີຄະຕະປັດສີກໍໄດ້ ຫຼື ທ່ານກໍໄດ້ ຄວນໂຕ້ວາທະກັບພຣະສະມະນະໂຄດົມ"

ແມ່ນເທື່ອທີ ၃ ນິຄົນຊື່ທີຄະຕະປັດສີກໍໄດ້ກ່າວເຕືອນນິຄົນນາຕະບຸດວ່າ "ທ່ານຜູ້ຈະເລີນ ການທີ່ອຸບາລີຄະຫະບໍດີຈະເພິ່ງໂຕ້ວາທະກັບພຣະສະມະນະໂຄດົມນັ້ນ ຂ້າພະເຈົ້າບໍ່ພໍໃຈເລີຍ ຍ້ອນພຣະສະມະນະໂຄດົມເປັນຄົນມີມານຍາ ຮູ້ມາຍາເປັນເຄື່ອງກັບໃຈພວກສາວົກຂອງ ອັນຍະເດຍຣະຖີໄດ້"

ນິຄົນ ນາຕະບຸດ ກ່າວວ່າ "ຕະປັດສີ ເປັນໄປບໍ່ໄດ້ເລີຍທີ່ອຸບາລີຄະຫະບໍດີຈະເພິ່ງ ເປັນສາວົກຂອງພຣະສະມະນະໂຄດົມ ແຕ່ເປັນໄປໄດ້ທີ່ພຣະສະມະນະໂຄດົມຈະເພິ່ງເປັນສາວົກຂອງອຸບາລີຄະຫະບໍດີ

ຄະຫະບໍດີ ທ່ານຈົ່ງໄປ ຈົ່ງໂຕ້ວາທະໃນເລື້ອງທີ່ເວົ້າກັນນີ້ກັບພຣະສະມະນະໂຄດົມ ແທ້ຈິງ ເຮົາກໍໄດ້ ທີຄະຕະປັດສີກໍໄດ້ ຫຼື ທ່ານກໍໄດ້ ຄວນໂຕ້ວາທະກັບພຣະສະມະນະໂຄດົມ"

ອຸບາລີຄະຫະບໍດີຮັບຄຳນິຄົນ ນາຕະບຸດແລ້ວລຸກຈາກບ່ອນນັ່ງ ໄຫວ້ນິຄົນນາຕະບຸດ ແລະກະທຳປະທັກຂິນແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງປາວາຣິກຳພະວັນ ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ທ່ານຜູ້ຈະເລີນ ນິຄົນຊື່ ທີຄະຕະປັດສີໄດ້ມາທີ່ນີ້ແດ່ບໍ?"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຕອບວ່າ "ມາ ຄະຫະບໍດີ"

"ທ່ານຜູ້ຈະເລີນ ທ່ານໄດ້ສົນທະນາປາໄສກັບນິຄົນຊື່ທີຄະຕະປັດສີແດ່ບໍ?"

"ໄດ້ສົນທະນາ ຄະຫະບໍດີ"

"ທ່ານຜູ້ຈະເລີນ ທ່ານໄດ້ສົນທະນາປາໄສເລື້ອງອັນໃດກັບນິຄົນຊື່ທີຄະຕະປັດສີບໍ?"

ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດບອກເລື້ອງທີ່ສົນທະນາປາໄສກັບນິຄົນຊື່ ທີຄະຕະປັດສີທັງໝົດ ແກ່ອຸບາລີຄະຫະບໍດີທຸກປະການ

[໖໑] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ອຸບາລີຄະຫະບໍດີໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ດີແລ້ວ ດີແລ້ວ ທ່ານຜູ້ຈະເລີນ ທີຄະຕະປັດສີຊີ້ແຈ່ງດີແລ້ວ ຖືກຕ້ອງແລ້ວ ການທີ່ນິຄົນ ຊື່ທີຄະຕະປັດສີຊີ້ແຈ່ງໃຫ້ພຣະຜູ້ມີພຣະພາກເຈົ້າຟັງນັ້ນ ກົງຕາມທີ່ສາວົກຜູ້ໄດ້ສຶກສາຈົບຮູ້ທົ່ວເຖິງ ຄຳສອນຂອງສາດສະດາແນວຖືກຕ້ອງຊີ້ແຈ່ງໄວ້ ມະໂນທັນດະອັນຕໍ່າຊາມຈະດີງາມໄດ້ແນວໃດ ເມື່ອທຽບກັບກາຍທັນດະທີ່ສຳຄັນແນວນີ້ ແທ້ຈິງໃນການເຮັດກຳຊົ່ວ ໃນການປະພຶດກຳຊົ່ວ ກາຍທັນດະທີ່ນັ້ນມີໂທດຫລາຍກວ່າ ບໍ່ແມ່ນວະຈີທັນດະ ຫຼືມະໂນທັນດະເລີຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຄະຫະບໍດີ ຫາກທ່ານຈະເພິ່ງຍຶດໝັ້ນຢູ່ໃນຄຳສັດແລ້ວສົນທະນາກັນ ເຮົາຈຶ່ງຈະສົນທະນາໃນເລື້ອງນີ້ດ້ວຍ"

ອຸບາລີຄະຫະບໍດີຂາບທູນວ່າ "ທ່ານຜູ້ຈະເລີນ ຂ້າພະເຈົ້າຈະຍຶດໝັ້ນຄຳສັດແລ້ວສົນທະນາກັນ ເຮົາທັງ ໒ ຈົ່ງມາສົນທະນາກັນໃນເລື້ອງນີ້ເທີ້ນ"

## ພຣະຜູ້ມີພຣະພາກເຈົ້າຊົງຍ້ອນຖາມບັນຫາ

[໖໒] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ຄະຫະບໍດີ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ນິຄົນໃນໂລກນີ້ປ່ວຍ ມີທຸກ ເປັນໄຂ້ໜັກ ຖືກຫ້າມໃຊ້ນໍ້າເຢັນ ໃຊ້ແຕ່ນໍ້າຮ້ອນ ເມື່ອເຂົາບໍ່ໄດ້ນໍ້າເຢັນຈະຕ້ອງຕາຍ ນິຄົນນາຕະບຸດບັນຍັດວ່າ ນິຄົນຜູ້ນີ້ຈະໄປເກີດຢູ່ໃສ?"

ອຸບາລີຄະຫະບໍດີທູນຕອບວ່າ "ທ່ານຜູ້ຈະເລີນ ເຫຼົ່າເທບທີ່ຊື່ວ່າມໂນສັດມີຢູ່ ເຂົາຍ່ອມເກີດໃນໝູ່ເທບນັ້ນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຂົາເປັນຜູ້ມີໃຈມັດພັນຕາຍໄປ"

"ຄະຫະບໍດີ ທ່ານຈົ່ງໃສ່ໃຈແລ້ວຊີ້ແຈ່ງເບິ່ງດູ ເປັນຫຍັງ ຄຳຫລັງກັບຄຳກ່ອນ ຫຼື ຄຳກ່ອນກັບຄຳຫລັງ ຂອງທ່ານຈຶ່ງບໍ່ສຳພັນກັນນໍ ຄະຫະບໍດີ ທ່ານກ່າວຄຳນີ້ໄວ້ວ່າ "ທ່ານຜູ້ຈະເລີນ ຂ້າພະເຈົ້າ ຈະຍຶດໝັ້ນຄຳສັດແລ້ວສົນທະນາກັນ ເຮົາທັງ ໒ ຈົ່ງມາສົນທະນາກັນໃນເລື້ອງນີ້ເທີ້ນ"

"ທ່ານຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຕັດແນວນີ້ກໍຖືກ ຢ່າງໃດກໍ່ຕາມ ໃນການເຮັດກຳຊົ່ວໃນການປະພຶດຕິກຳຊົ່ວ ກາຍທັນດະທີ່ນັ້ນມີໂທດຫລາຍກວ່າ ບໍ່ແມ່ນວະຈີທັນດະ ຫຼື ມະໂນທັນດະເລີຍ"

[໖໓] "ຄະຫະບໍດີ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໃນໂລກນີ້ນິຄົນ ນາຕະບຸດເພິ່ງເປັນຜູ້ສັງລວມດ້ວຍການສັງວອນ ໔ ແນວ ຄື

໑. ເວັ້ນນໍ້າດິບທຸກແນວ
໒. ປະກອບກິດທີ່ເວັ້ນຈາກບາບທຸກແນວ

໓. ລ້າງບາບທຸກແນວ

໔. ຮັບສຳຜັດທຸກແນວໂດຍບໍ່ໃຫ້ເກີດບາບ

ແຕ່ຂະນະທ່ານກ້າວໄປ ຖອຍກັບ ຍ່ອມເຮັດໃຫ້ສັດນ້ອຍ ໆ ຕາຍໄປເປັນຈຳນວນຫລາຍ ຄະຫະບໍດີ ນິຄົນ ນາຕະບຸດຈະບັນຍັດວ່າ ນິຄົນຜູ້ນີ້ມີວິບາກແນວໃດ?"

"ທ່ານຜູ້ຈະເລີນ ນິຄົນ ນາຕະບຸດບໍ່ໄດ້ບັນຍັດກຳທີ່ບໍ່ຈົງໃຈວ່າ ມີໂທດຫຼາຍ"

"ຖ້າເປັນກຳທີ່ຈົງໃຈ ຄະຫະບໍດີ"

"ກໍເປັນກຳມີໂທດຫຼາຍ ທ່ານຜູ້ຈະເລີນ"

"ນິຄົນ ນາຕະບຸດບັນຍັດຄວາມຈົງໃຈໄວ້ໃນສ່ວນໃດນໍ ຄະຫະບໍດີ"

"ໃນມະໂນທັນດະ ທ່ານຜູ້ຈະເລີນ"

"ຄະຫະບໍດີ ທ່ານຈົ່ງກຳນົດໃຈແລ້ວຊີ້ແຈງເບິ່ງດູ ເປັນຫຍັງ ຄຳຫລັງກັບຄຳກ່ອນ ຫຼື ຄຳກ່ອນກັບຄຳຫລັງຂອງທ່ານ ຈຶ່ງບໍ່ສຳພັນກັນນໍ ທ່ານກ່າວຄຳນີ້ໄວ້ວ່າ "ທ່ານຜູ້ຈະເລີນ ຂ້າພະເຈົ້າຈະຍຶດໝັ້ນຄຳສັດແລ້ວສົນທະນາກັນ ເຮົາທັງ ໔ ຈົ່ງມາສົນທະນາກັນໃນເລື່ອງນີ້ເທີ້ນ"

"ທ່ານຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຕັດແນວນີ້ກໍຖືກ ຢ່າງໃດກໍ່ຕາມ ໃນການເຮັດກຳຊົ່ວ ໃນການປະພຶດຕິກຳຊົ່ວ ກາຍທັນດະທໍ່ນັ້ນມີໂທດຫລາຍກວ່າ ບໍ່ແມ່ນວະຈີທັນດະ ຫຼື ມະໂນທັນດະເລີຍ"

[໖໔] "ຄະຫະບໍດີ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບ້ານນາລັນທານີ້ຮັ່ງມີ ອຸດົມສົມບູນມີປະຊາກອນຫຼາຍ ມີພົນລະເມືອງໜາແໜ້ນ ບໍ່ແມ່ນບໍ"

"ແມ່ນ ທ່ານຜູ້ຈະເລີນ ບ້ານນາລັນທານີ້ຮັ່ງມີ ອຸດົມສົມບູນ ມີປະຊາກອນຫຼາຍ ມີພົນລະເມືອງໜາແໜ້ນ"

"ຄະຫະບໍດີ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຊາຍຄົນໜຶ່ງໃນບ້ານນາລັນທານີ້ ເງື້ອດາບຂຶ້ນພ້ອມກັບເວົ້າວ່າ "ເຮົາຈັກເຮັດສັດທໍ່ທີ່ມີຢູ່ໃນບ້ານນາລັນທານີ້ໃຫ້ເປັນລານຊີ້ນດຽວກັນ ໃຫ້ເປັນກອງຊີ້ນດຽວກັນ ຊົ່ວຂະນະພິບຕາດຽວ" ທ່ານເຂົ້າໃຈຄວາມຂໍ້ນັ້ນ ວ່າແນວໃດ ເຂົາຈະສາມາດເຮັດສັດທໍ່ທີ່ມີຢູ່ໃນບ້ານນາລັນທານີ້ໃຫ້ເປັນລານຊີ້ນດຽວກັນ ໃຫ້ເປັນກອງຊີ້ນດຽວກັນຊົ່ວຂະນະພິບຕາດຽວໄດ້ບໍ?"

"ທ່ານຜູ້ຈະເລີນ ຕໍ່ໃຫ້ຊາຍ ໑໐ ຄົນ ໒໐ ຄົນ ໓໐ ຄົນ ໔໐ ຄົນ ໕໐ ຄົນ ກໍບໍ່ສາມາດຈະເຮັດສັດທໍ່ທີ່ມີຢູ່ໃນບ້ານນາລັນທານີ້ໃຫ້ເປັນລານຊີ້ນດຽວກັນ ໃຫ້ເປັນກອງຊີ້ນດຽວກັນຊົ່ວຂະນະພິບຕາດຽວໄດ້ ຊາຍຜູ້ຕ່ຳຊາມຄົນດຽວຈະເກັ່ງກາດອັນໃດ ປານນັ້ນ"

"ຄະຫະບໍດີ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ສະມະໜະຫຼືພາມຜູ້ມີລິດ ຜູ້ເຖິງຄວາມຊ່ຽວຊານທາງຈິດມາໃນບ້ານນາລັນທານີ້ ສະມະໜະຫຼືພາມນັ້ນບອກແນວນີ້ວ່າ "ເຮົາຈັກເຮັດບ້ານນາລັນທານີ້ໃຫ້ເປັນເທົ່າດ້ວຍຈິດຄິດປະທຸດສະຮ້າຍເທື່ອດຽວ" ຄະຫະບໍດີ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ສະມະໜະຫຼືພາມຜູ້ມີລິດ ຜູ້ເຖິງຄວາມຊ່ຽວຊານທາງຈິດນັ້ນ ຈະສາມາດເຮັດບ້ານນາລັນທານີ້ໃຫ້ເປັນເທົ່າ ດ້ວຍຈິດຄິດປະທຸດສະຮ້າຍເທື່ອດຽວ ໄດ້ບໍ"

"ທ່ານຜູ້ຈະເລີນ ບ້ານນາລັນທາ ໑໐ ຫລັງ ໒໐ ຫລັງ ໓໐ ຫລັງ ໔໐ ຫລັງ ໕໐ ຫລັງ ສະມະໜະ ຫຼື ພາມຜູ້ມີລິດ ຜູ້ເຖິງຄວາມຊ່ຽວຊານທາງຈິດນັ້ນ ຍັງສາມາດເຮັດໃຫ້ເປັນເທົ່າໄດ້ດ້ວຍຈິດຄິດປະທຸດສະຮ້າຍເທື່ອດຽວ ແລ້ວບ້ານນາລັນທາທີ່ຊຸດໂຊມຫລັງດຽວຈະຄະນະນາອັນໃດນໍ?"

"ຄະຫະບໍດີ ທ່ານຈົ່ງກຳນົດໃຈແລ້ວຊີ້ແຈ່ງເບິ່ງດູ ເປັນຫຍັງ ຄຳຫລັງກັບຄຳກ່ອນ ຫຼືຄຳກ່ອນກັບຄຳຫລັງຂອງທ່ານ ຈຶ່ງບໍ່ສຳພັນກັນນໍ ຄະຫະບໍດີ ທ່ານກ່າວຄຳນີ້ໄວ້ວ່າ "ທ່ານຜູ້ຈະເລີນຂ້າພະເຈົ້າຈະຢຶດໝັ້ນຄຳສັດແລ້ວສົນທະນາກັນ ເຮົາທັງ ໒ ຈົ່ງມາສົນທະນາກັນໃນເລື້ອງນີ້ເທີ້ນ"

"ທ່ານຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຕັດແນວນີ້ກໍ່ຖືກ ຢ່າງໃດກໍ່ຕາມ ໃນການເຮັດກຳຊົ່ວໃນການປະພຶດຕິກຳຊົ່ວ ກາຍທັນດະທໍ່ນັ້ນມີໂທດຫລາຍກວ່າ ບໍ່ແມ່ນວະຈີທັນດະ ຫຼື ມະໂນທັນດະເລີຍ"

[໖໕] "ຄະຫະບໍດີ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ປ່າທັນຖະກີ ປ່າກາລິງຄະ ປ່າເມດຊະ ປ່າມາຕັງຄະ ໄດ້ກາຍເປັນປ່າຕຶບ ທ່ານໄດ້ຟັງມາແລ້ວບໍ່ແມ່ນບໍ?"

"ແມ່ນ ທ່ານຜູ້ຈະເລີນ ຂ້າພະເຈົ້າໄດ້ຟັງມາແລ້ວ"

"ຄະຫະບໍດີ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ປ່າທັນຖະກີ ປ່າກາລິງຄະ ປ່າເມດຊະ ປ່າມາຕັງຄະ ໄດ້ກາຍເປັນປ່າຕຶບຍ້ອນໃຜ"

"ທ່ານຜູ້ຈະເລີນ ຂ້າພະເຈົ້າໄດ້ຍິນມາວ່າ ປ່າທັນຖະກີ ປ່າກາລິງຄະ ປ່າເມດຊະ ປ່າມາຕັງຄະໄດ້ກາຍເປັນປ່າຕຶບຍ້ອນຈິດຄິດປະທຸດສະຮ້າຍຂອງພວກລືສີ"

"ຄະຫະບໍດີ ທ່ານຈົ່ງກຳນົດໃຈແລ້ວຊີ້ແຈ່ງເບິ່ງດູ ເປັນຫຍັງຄຳຫລັງກັບຄຳກ່ອນ ຫຼື ຄຳກ່ອນກັບຄຳຫລັງຂອງທ່ານ ຈຶ່ງບໍ່ສຳພັນກັນນໍ ຄະຫະບໍດີ ທ່ານກ່າວຄຳນີ້ໄວ້ວ່າ "ທ່ານຜູ້ຈະເລີນຂ້າພະເຈົ້າຈະຢຶດໝັ້ນຄຳສັດແລ້ວສົນທະນາກັນ ເຮົາທັງ ໒ ຈົ່ງມາສົນທະນາກັນໃນເລື້ອງນີ້ເທີ້ນ"

# ອຸບາລີຄະຫະບໍດີສະແດງຕົນເປັນອຸປາສົກ

[໖໖] "ຂ້າແດ່ພຣະອົງຜູ້ຈະເລີນ ພຽງອຸປະມາຂໍ້ທຳອິດຂ້າພຣະອົງກໍມີໃຈຍິນດີຊົມຊື່ນຕໍ່ພຣະຜູ້ມີພຣະພາກເຈົ້າແລ້ວ ແຕ່ຂ້າພຣະອົງປາຖະໜາຈະຟັງປະຕິພານການຊີ້ແຈ່ງບັນຫາອັນວິຈິດນີ້ຂອງພຣະຜູ້ມີພຣະພາກເຈົ້າ ສັນນັ້ນ ຂ້າພຣະອົງຈຶ່ງໄດ້ແກ້ງເຮັດເປັນຄືຢູ່ ຕ່າງຝ່າຍກັບພຣະຜູ້ມີພຣະພາກເຈົ້າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫລົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້"

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

[໖໗] "ຄະຫະບໍດີ ທ່ານຈົ່ງພິຈາຣະນາກ່ອນແລ້ວຈຶ່ງເຮັດເທີ້ນ ການພິຈາຣະນາກ່ອນແລ້ວຈຶ່ງເຮັດ ເປັນຄວາມດີສຳລັບຄົນທີ່ມີຊື່ສຽງເຊັ່ນທ່ານ"

"ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນດ້ວຍພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດກັບຂ້າພຣະອົງແນວນີ້ວ່າ "ຄະຫະບໍດີ ທ່ານຈົ່ງພິຈາຣະນາກ່ອນແລ້ວຈຶ່ງເຮັດເທີ້ນ ການພິຈາຣະນາກ່ອນແລ້ວຈຶ່ງເຮັດ ເປັນຄວາມດີສຳລັບຄົນທີ່ມີຊື່ສຽງເຊັ່ນທ່ານ" ຂ້າພຣະອົງຍິ່ງມີໃຈຍິນດີຊົມຊື່ນຕໍ່ພຣະຜູ້ມີພຣະພາກເຈົ້າຍິ່ງຂຶ້ນ ດ້ວຍວ່າ ພວກອັນຍະເດຍຣະຖີໄດ້ຂ້າພຣະອົງເປັນສາວົກແລ້ວກໍຈະເພີ່ງທ່ຽວປະກາດໄປທົ່ວໝູ່ບ້ານນາລັນທາວ່າ "ອຸບາລີຄະຫະບໍດີເປັນສາວົກຂອງພວກເຮົາ" ກໍແລ ພຣະຜູ້ມີພຣະພາກເຈົ້າຕັດກັບຂ້າພຣະອົງແນວນີ້ວ່າ "ຄະຫະບໍດີ ທ່ານຈົ່ງພິຈາຣະນາກ່ອນແລ້ວຈຶ່ງເຮັດເທີ້ນ ການພິຈາຣະນາກ່ອນແລ້ວຈຶ່ງເຮັດ ເປັນຄວາມດີສຳລັບຄົນທີ່ມີຊື່ສຽງເຊັ່ນທ່ານ"

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ເປັນເທື່ອທີ ໒ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

[໖໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຄະຫະບໍດີ ຕະກູນຂອງທ່ານເປັນຄືບໍ່ນ້ຳຂອງພວກນິຄົນມາດົນແລ້ວ ທ່ານຄວນເຂົ້າໃຈວ່າ ຄວນໃຫ້ບິນທະບາດແກ່ນິຄົນເຫຼົ່ານັ້ນຜູ້ເຂົ້າໄປຫາຕໍ່ໄປເທີ້ນ"

ອຸບາລີຄະຫະບໍດີຂາບທູນວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນດ້ວຍພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດກັບຂ້າພຣະອົງແນວນີ້ວ່າ “ຕະກູນຂອງທ່ານເປັນຄືບໍ່ນ້ຳຂອງພວກນິຄົນມາດົນແລ້ວ ທ່ານຄວນເຂົ້າໃຈວ່າ ຄວນໃຫ້ບິນທະບາດແກ່ນິຄົນເຫຼົ່ານັ້ນຜູ້ເຂົ້າໄປຫາຕໍ່ໄປເທີ້ນ” ນີ້ຂ້າພຣະອົງຍິ່ງມີໃຈຍິນດີຊົມຊື່ນຕໍ່ພຣະຜູ້ມີພຣະພາກເຈົ້າຫຼາຍຍິ່ງຂຶ້ນ ຂ້າພຣະອົງໄດ້ຟັງຄຳນີ້ມາວ່າ “ພຣະສະມະນະໂຄດົມຕັດແນວນີ້ວ່າ “ບຸກຄົນຄວນໃຫ້ທານແກ່ເຮົາທໍ່ນັ້ນ ບໍ່ຄວນໃຫ້ແກ່ຄົນເຫຼົ່າອື່ນ ບຸກຄົນຄວນໃຫ້ທານແກ່ສາວົກຂອງເຮົາທໍ່ນັ້ນ ບໍ່ຄວນໃຫ້ແກ່ພວກ ສາວົກຂອງນັກບວດເຫຼົ່າອື່ນ ທານທີ່ໃຫ້ແກ່ເຮົາທໍ່ນັ້ນຍ່ອມມີຜົນຫຼາຍ ທີ່ໃຫ້ແກ່ຄົນເຫຼົ່າອື່ນຫາມີຜົນຫຼາຍບໍ່ ທານທີ່ໃຫ້ແກ່ສາວົກທັງຫລາຍຂອງເຮົາທໍ່ນັ້ນຍ່ອມມີຜົນຫຼາຍ ທີ່ໃຫ້ແກ່ ສາວົກຂອງນັກບວດເຫຼົ່າອື່ນຫາມີຜົນຫຼາຍບໍ່” ແຕ່ຄວາມຈິງ ພຣະຜູ້ມີພຣະພາກເຈົ້າຊົງຊັກຊວນໃຫ້ຂ້າພຣະອົງໃຫ້ທານແມ່ນໃນພວກນິຄົນ ກໍແລ ຂ້າພຣະອົງຈັກຮູ້ການອັນສົມຄວນໃນການໃຫ້ທານນີ້ຕໍ່ໄປ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ເປັນເທື່ອທີ ໓ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ”

## ອຸບາລີຄະຫະບໍດີບັນລຸທຳ

[໖໙] ຫລັງຈາກນັ້ນ ພຣະຜູ້ມີພຣະພາກເຈົ້າຕັດອະນຸບຸບພິກະຖາ ແກ່ອຸບາລີຄະຫະບໍດີ ຄື ຊົງປະກາດທານະກະຖາ (ເລື້ອງທານ) ສີລະກະຖາ (ເລື້ອງສິນ) ສັຄຄະກະຖາ (ເລື້ອງສະຫວັນ) ກາມາທີນະວະກະຖາ (ເລື້ອງໂທດຄວາມຕ່ຳຊາມ ຄວາມເສົ້າໝອງແຫ່ງກາມ) ແລະເນກຂຳມານິສັງສະກະຖາ (ເລື້ອງອານິສົງແຫ່ງການອອກຈາກກາມ) ເມື່ອໃດ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ອຸບາລີຄະຫະບໍດີ ມີຈິດຄວນບັນລຸທຳ ມີຈິດອ່ອນ ມີຈິດປາສະຈາກນິວອນ ມີຈິດສູງ ມີຈິດຜ່ອງໃສ ເມື່ອນັ້ນ ຈຶ່ງຊົງສະແດງພຣະທຳເທດສະໜາທີ່ພຣະພຸດທະເຈົ້າ (ພຣະອົງກ່ອນໆ) ທັງຫລາຍ ຊົງຍົກຂຶ້ນສະແດງດ້ວຍພຣະອົງເອງ ຄື ທຸກ ສະມຸໄທ ນິໂຣດ ມັກ ຜ້າຂາວສະອາດປາສະຈາກສິ່ງ ປົນເປື້ອນ ຈະເພິ່ງຮັບນ້ຳຍ້ອມຕ່າງ ໆ ໄດ້ຢ່າງດີ ແມ່ນສັນໃດ ທຳຈັກຂຸອັນປາສະຈາກທຸລີ ປາສະຈາກມົນທິນ ເກີດຂຶ້ນແກ່ອຸບາລີຄະຫະບໍດີ ຂະນະທີ່ນັ່ງຢູ່ນັ້ນເອງວ່າ “ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງລ້ວນມີຄວາມດັບໄປເປັນທຳມະດາ” ກໍສັນນັ້ນຄືກັນ

ຈາກນັ້ນ ອຸບາລີຄະຫະບໍດີເຫັນທຳ ບັນລຸທຳ ຮູ້ທຳ ຢັ່ງລົງສູ່ທຳ ໝົດຄວາມສົງໄສ ບໍ່ມີຄຳຖາມໃດ ໆ ມີຄວາມແກ່ກ້າ ບໍ່ຕ້ອງເຊື່ອໃຜອີກໃນຫລັກຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າຈັ່ງຊັ້ນ ບັດນີ້ ຂ້າພຣະອົງຂໍທູນລາກັບ ຍ້ອນມີກິດມີໜ້າທີ່ທີ່ຈະຕ້ອງເຮັດອີກຫຼາຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຄະຫະບໍດີ ທ່ານຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

[໗໐] ຈາກນັ້ນ ອຸບາລີຄະຫະບໍດີຊົມຊື່ນຍິນດີ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ແລ້ວ ລຸກຈາກບ່ອນນັ່ງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວກັບໄປສູ່ທີ່ຢູ່ຂອງຕົນ ຮຽກນາຍປະຕູມາສັ່ງວ່າ

"ນາຍປະຕູເພື່ອນຮັກ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ເຮົາຈະອັດປະຕູກັນພວກນິຄົນທັງຊາຍແລະຍິງ ແຕ່ເຮົາຈະໄຂປະຕູໄວ້ສຳລັບພຣະຜູ້ມີພຣະພາກເຈົ້າ ແລະສາວົກຂອງພຣະຜູ້ມີພຣະພາກເຈົ້າ ຄື ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ຖ້ານິຄົນຄົນໃດຄົນໜຶ່ງມາ ທ່ານເພິ່ງບອກ ແບບນີ້ວ່າ "ຢຸດກ່ອນທ່ານ ຢ່າເຂົ້າໄປເລີຍ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ອຸບາລີຄະຫະບໍດີເປັນສາວົກຂອງພຣະສະມະນະໂຄດົມແລ້ວ ອຸບາລີຄະຫະບໍດີອັດປະຕູກັນພວກນິຄົນທັງຊາຍແລະຍິງ ແຕ່ໄຂປະຕູໄວ້ສຳລັບພຣະຜູ້ມີພຣະພາກເຈົ້າ ແລະ ສາວົກຂອງພຣະຜູ້ມີພຣະພາກເຈົ້າ ຄື ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ຫາກທ່ານຕ້ອງການອາຫານກໍຈົ່ງຖ້າຢູ່ທີ່ນີ້ແລ້ວ ຈະມີຄົນນຳມາໃຫ້ບ່ອນນີ້ເອງ"

ນາຍປະຕູຮັບຄຳອຸບາລີຄະຫະບໍດີແລ້ວ

[໗໑] ນິຄົນຊື່ທີຄະຕະປັດສີໄດ້ຂ່າວວ່າ "ຂ່າວວ່າ ອຸບາລີຄະຫະບໍດີເປັນສາວົກຂອງພຣະສະມະນະໂຄດົມແລ້ວ" ລຳດັບນັ້ນ ຈຶ່ງເຂົ້າໄປຫານິຄົນ ນາຕະບຸດຮອດບ່ອນຢູ່ແລ້ວຖາມວ່າ "ທ່ານຜູ້ຈະເລີນ ຂ້າພະເຈົ້າໄດ້ຂ່າວວ່າ "ຂ່າວວ່າ ອຸບາລີຄະຫະບໍດີເປັນສາວົກຂອງພຣະສະມະນະໂຄດົມແລ້ວ"

ນິຄົນ ນາຕະບຸດຕອບວ່າ "ຕະປັດສີ ເປັນໄປບໍ່ໄດ້ເລີຍທີ່ອຸບາລີຄະຫະບໍດີຈະເພິ່ງເປັນສາວົກຂອງພຣະສະມະນະໂຄດົມນັ້ນ ແຕ່ເປັນໄປໄດ້ທີ່ພຣະສະມະນະໂຄດົມຈະເພິ່ງເປັນສາວົກຂອງອຸບາລີຄະຫະບໍດີ"

ແມ່ນເທື່ອທີ ໒ ນິຄົນຊື່ທີຄະຕະປັດສີກໍໄດ້ກ່າວກັບນິຄົນ ນາຕະບຸດວ່າ "ທ່ານ ຜູ້ຈະເລີນ ຂ້າພະເຈົ້າໄດ້ຂ່າວວ່າ "ຂ່າວວ່າ ອຸບາລີຄະຫະບໍດີເປັນສາວົກຂອງພຣະສະມະນະໂຄດົມແລ້ວ"

ນິຄົນ ນາຕະບຸດກໍຍັງເວົ້າວ່າ "ຕະປັດສີ ເປັນໄປບໍ່ໄດ້ເລີຍທີ່ອຸບາລີຄະຫະບໍດີຈະເພິ່ງເປັນສາວົກຂອງພຣະສະມະນະໂຄດົມນັ້ນ ແຕ່ເປັນໄປໄດ້ທີ່ພຣະສະມະນະໂຄດົມຈະເພິ່ງເປັນສາວົກຂອງອຸບາລີຄະຫະບໍດີ"

ແມ່ນເທື່ອທີ ໓ ນິຄົນຊື່ທີຄະຕະປັດສີກໍໄດ້ກ່າວກັບນິຄົນ ນາຕະບຸດວ່າ "ທ່ານຜູ້ຈະເລີນ ຂ້າພະເຈົ້າໄດ້ຂ່າວວ່າ "ຂ່າວວ່າ ອຸບາລີຄະຫະບໍດີເປັນສາວົກຂອງພຣະສະມະນະໂຄດົມແລ້ວ"

ນິຄົນ ນາຕະບຸດກໍຍັງເວົ້າດ້ວຍຄວາມໝັ້ນໃຈວ່າ "ຕະປັດສີ ເປັນໄປບໍ່ໄດ້ເລີຍທີ່ອຸບາລີຄະຫະບໍດີ ຈະເພິ່ງເປັນສາວົກຂອງພຣະສະມະນະໂຄດົມນັ້ນ ແຕ່ເປັນໄປໄດ້ທີ່ພຣະສະມະນະໂຄດົມຈະເພິ່ງເປັນສາວົກຂອງອຸບາລີຄະຫະບໍດີ"

ນິຄົນຊື່ທີຄະຕະປັດສີກ່າວວ່າ "ທ່ານຜູ້ຈະເລີນ ຖ້າຈັ່ງຊັ້ນ ຂ້າພະເຈົ້າຈະໄປເບິ່ງໃຫ້ຮູ້ແນ່ວ່າ ອຸບາລີຄະຫະບໍດີເປັນສາວົກຂອງພຣະສະມະນະໂຄດົມ ແມ່ນແທ້ບໍ?"

ນິຄົນ ນາຕະບຸດຈຶ່ງກ່າວວ່າ "ຕະປັດສີ ທ່ານໄປເທີ້ນ ຈະໄດ້ຮູ້ວ່າ ອຸບາລີຄະຫະບໍດີເປັນສາວົກຂອງພຣະສະມະນະໂຄດົມ ແມ່ນແທ້ບໍ?"

## ອຸບາລີຄະຫະບໍດີບໍ່ຕ້ອນຮັບນິຄົນ

[໗໔] ຕໍ່ມາ ນິຄົນຊື່ທີຄະຕະປັດສີເຂົ້າໄປສູ່ທີ່ຢູ່ຂອງອຸບາລີຄະຫະບໍດີ ນາຍປະຕູເຫັນເຂົາຍ່າງມາແຕ່ໄກຈຶ່ງບອກວ່າ

"ຢຸດກ່ອນທ່ານ ຢ່າເຂົ້າໄປເລີຍ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ອຸບາລີຄະຫະບໍດີເປັນສາວົກຂອງພຣະສະມະນະໂຄດົມແລ້ວ ອຸບາລີຄະຫະບໍດີອັດປະຕູກັນພວກນິຄົນທັງຊາຍແລະຍິງ ແຕ່ໄຂປະຕູໄວ້ສຳລັບພຣະຜູ້ມີພຣະພາກເຈົ້າ ແລະ ສາວົກຂອງພຣະຜູ້ມີພຣະພາກເຈົ້າ ຄື ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ຖ້າທ່ານຕ້ອງການອາຫານກໍຈົ່ງຖ້າຢູ່ທີ່ນີ້ແລ້ວ ຈະມີຄົນນຳມາໃຫ້ບ່ອນນີ້ເອງ"

ນິຄົນຊື່ທີຄະຕະປັດສີບອກວ່າ "ຂ້າພະເຈົ້າບໍ່ຕ້ອງການອາຫານດອກ" ແລ້ວກັບຈາກທີ່ນັ້ນເຂົ້າໄປຫານິຄົນ ນາຕະບຸດຮອດບ່ອນຢູ່ແລ້ວກ່າວ ວ່າ

"ທ່ານຜູ້ຈະເລີນ ເປັນຄວາມຈິງຢ່າງແນ່ນອນທີ່ອຸບາລີຄະຫະບໍດີເປັນສາວົກຂອງພຣະສະມະນະໂຄດົມ ຂໍ້ນັ້ນ ຂ້າພະເຈົ້າບໍ່ເຫັນດ້ວຍກັບທ່ານດັ່ງໄດ້ກ່າວໄວ້ແລ້ວວ່າ "ການທີ່ອຸບາລີຄະຫະບໍດີຈະໂຕ້ວາທະກັບພຣະສະມະນະໂຄດົມນັ້ນ ຂ້າພະເຈົ້າບໍ່ພໍໃຈເລີຍ ຍ້ອນພຣະສະມະນະໂຄດົມເປັນຄົນມີມານຍາ ຮູ້ມາຍາເປັນເຄື່ອງກັບໃຈສາວົກຂອງພວກອັນຍະເດຍຣະຖີໄດ້ ທ່ານຜູ້ຈະເລີນ ອຸບາລີຄະຫະບໍດີຂອງທ່ານຄົງຖືກພຣະສະມະນະໂຄດົມກັບໃຈດ້ວຍມາຍາເປັນເຄື່ອງກັບໃຈສາແລ້ວ"

ນິຄົນ ນາຕະບຸດ ກ່າວວ່າ "ຕະປັດສີ ເປັນໄປບໍ່ໄດ້ເລີຍທີ່ອຸບາລີຄະຫະບໍດີຈະເພິ່ງ ເປັນສາວົກຂອງພຣະສະມະນະໂຄດົມນັ້ນ ແຕ່ເປັນໄປໄດ້ທີ່ພຣະສະມະນະໂຄດົມຈະເພິ່ງເປັນສາວົກຂອງອຸບາລີຄະຫະບໍດີ"

ແມ່ນເທື່ອທີ ໘ ນິຄົນຊື່ທີຄະຕະປັດສີກໍໄດ້ກ່າວກັບນິຄົນ ນາຕະບຸດວ່າ "ທ່ານ ຜູ້ຈະເລີນ ເປັນຄວາມຈິງຢ່າງແນ່ນອນທີ່ອຸບາລີຄະຫະບໍດີເປັນສາວົກຂອງພຣະສະມະນະໂຄດົມ ຂໍ້ນັ້ນຂ້າພະເຈົ້າບໍ່ເຫັນດ້ວຍກັບທ່ານດັ່ງໄດ້ກ່າວໄວ້ແລ້ວວ່າ "ການທີ່ອຸບາລີຄະຫະບໍດີຈະໂຕ້ວາທະກັບພຣະສະມະໜະໂຄດົມນັ້ນຂ້າພະເຈົ້າບໍ່ພໍໃຈເລີຍ ຍ້ອນພຣະສະມະນະໂຄດົມເປັນຄົນມີມານຍາຮູ້ມາຍາເປັນເຄື່ອງກັບໃຈສາວົກຂອງພວກອັນຍະເດຍຣະຖີໄດ້ ທ່ານຜູ້ຈະເລີນ ອຸບາລີຄະຫະບໍດີຂອງທ່ານຄົງຖືກພຣະສະມະນະໂຄດົມກັບໃຈດ້ວຍມາຍາເປັນເຄື່ອງກັບໃຈສາແລ້ວ"

ນິຄົນ ນາຕະບຸດ ກໍຍັງກ່າວວ່າ "ຕະປັດສີ ເປັນໄປບໍ່ໄດ້ເລີຍທີ່ອຸບາລີຄະຫະບໍດີ ຈະເພິ່ງເປັນສາວົກຂອງພຣະສະມະນະໂຄດົມນັ້ນ ແຕ່ເປັນໄປໄດ້ທີ່ພຣະສະມະນະໂຄດົມຈະເພິ່ງເປັນສາວົກຂອງອຸບາລີຄະຫະບໍດີ ຖ້າຈັ່ງຊັ້ນ ຕະປັດສີ ເຮົາຈະໄປເບິ່ງໃຫ້ຮູ້ແນ່ວ່າ ອຸບາລີຄະຫະບໍດີເປັນສາວົກຂອງ ພຣະສະມະນະໂຄດົມ ແມ່ນແທ້ບໍ?"

ລຳດັບນັ້ນ ນິຄົນ ນາຕະບຸດພ້ອມກັບບໍລິສັດນິຄົນເປັນຈຳນວນຫຼາຍໄດ້ເຂົ້າ ໄປສູ່ທີ່ຢູ່ຂອງອຸບາລີຄະຫະບໍດີ ນາຍປະຕູເຫັນນິຄົນ ນາຕະບຸດຍ່າງມາແຕ່ໄກຈຶ່ງເວົ້າເຕືອນທ່ານວ່າ

"ຢຸດກ່ອນທ່ານ ຢ່າເຂົ້າໄປເລີຍ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ອຸບາລີຄະຫະບໍດີເປັນສາວົກຂອງພຣະສະມະນະໂຄດົມແລ້ວ ອຸບາລີຄະຫະບໍດີອັດປະຕູກັນພວກນິຄົນທັງຊາຍແລະຍິງ ແຕ່ໄຂປະຕູໄວ້ສຳລັບພຣະຜູ້ມີພຣະພາກເຈົ້າ ແລະ ສາວົກຂອງພຣະຜູ້ມີພຣະພາກເຈົ້າ ຄື ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ຖ້າທ່ານຕ້ອງການອາຫານກໍຈົ່ງຖ້າຢູ່ທີ່ນີ້ແລ້ວ ຈະມີຄົນນຳມາໃຫ້ບ່ອນນີ້ເອງ"

ນິຄົນ ນາຕະບຸດ ກ່າວວ່າ "ນາຍປະຕູເພື່ອນຮັກ ຖ້າເຊັ່ນນັ້ນ ທ່ານຈົ່ງເຂົ້າໄປຫາ ອຸບາລີຄະຫະບໍດີແລ້ວບອກແນວນີ້ວ່າ "ທ່ານຂ້ານ້ອຍ ນິຄົນ ນາຕະບຸດພ້ອມກັບບໍລິສັດນິຄົນ ເປັນຈຳນວນຫຼາຍຢືນຖ້າຢູ່ນອກຊຸ້ມປະຕູ ເຂົາຕ້ອງການພົບທ່ານ"

ນາຍປະຕູຮັບຄຳແລ້ວເຂົ້າໄປຫາອຸບາລີຄະຫະບໍດີຮຽນວ່າ "ທ່ານຂ້ານ້ອຍ ນິຄົນ ນາຕະບຸດ ພ້ອມກັບບໍລິສັດນິຄົນເປັນຈຳນວນຫຼາຍຢືນຖ້າຢູ່ນອກຊຸ້ມປະຕູ ເຂົາຕ້ອງການພົບທ່ານ"

ອຸບາລີຄະຫະບໍດີກ່າວວ່າ "ນາຍປະຕູເພື່ອນຮັກ ຖ້າເຊັ່ນນັ້ນ ທ່ານຈົ່ງປູອາສະນະໄວ້ທີ່ສາລາ ປະຕູກາງ"

ນາຍປະຕູຮັບຄຳແລ້ວ ປູອາສະນະໄວ້ທີ່ສາລາປະຕູກາງສຳເລັດແລ້ວ ເຂົ້າໄປຫາອຸບາລີຄະຫະບໍດີ ຮຽນວ່າ "ທ່ານຂ້ານ້ອຍ ອາສະນະປູໄວ້ທີ່ສາລາປະຕູກາງສຳເລັດແລ້ວ ຂໍທ່ານຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

[໗໓] ຈາກນັ້ນ ອຸບາລິຄະຫະບໍດີເຂົ້າໄປສູ່ສາລາປະຕູກລາງນັ່ງເທິງອາສະນະເລີດ ລ້ຳຄ່າ ສູງສົ່ງ ແລະ ດີຍິ່ງນັ້ນເສຍເອງ ແລ້ວຮຽກນາຍປະຕູມາສັ່ງວ່າ "ນາຍປະຕູເພື່ອນຮັກ ຖ້າເຊັ່ນນັ້ນ ທ່ານຈົ່ງໄປຫານິຄົນ ນາຕະບຸດ ບອກກັບເຂົາແນວນີ້ວ່າ "ທ່ານໂດຍ ອຸບາລິຄະຫະບໍດີສັ່ງມາແນວນີ້ວ່າ "ຈົ່ງເຂົ້າໄປເທີ້ນໂດຍ ຖ້າທ່ານປະສົງ"

ນາຍປະຕູຮັບຄຳແລ້ວເຂົ້າໄປຫານິຄົນ ນາຕະບຸດ ຮຽນວ່າ "ທ່ານຂ້ານ້ອຍ ອຸບາລິຄະຫະບໍດີສັ່ງມາແນວນີ້ວ່າ "ຈົ່ງເຂົ້າໄປເທີ້ນຂ້ານ້ອຍ ຖ້າທ່ານປະສົງ"

ລຳດັບນັ້ນ ນິຄົນ ນາຕະບຸດພ້ອມກັບບໍລິສັດນິຄົນເປັນຈຳນວນຫຼາຍຈຶ່ງເຂົ້າໄປສູ່ ສາລາປະຕູກລາງ ໄດ້ຂ່າວວ່າ ແຕ່ກ່ອນ ອຸບາລິຄະຫະບໍດີເຫັນນິຄົນ ນາຕະບຸດຍ່າງມາຈະໄກແຕ່ໃດກໍຕາມ ກໍຈະໄປຕ້ອນຮັບເຖິງທີ່ນັ້ນ ເຊັດຖູອາສະນະເລີດ ລ້ຳຄ່າ ສູງສົ່ງ ແລະດີຍິ່ງດ້ວຍຜ້າຫົ່ມ ແລ້ວເຊື້ອເຊີນໃຫ້ນັ່ງ ບັດນີ້ ເຂົາກັບນັ່ງເທິງອາສະນະເລີດ ລ້ຳຄ່າ ສູງສົ່ງ ແລະດີຍິ່ງນັ້ນເສຍເອງ ແລ້ວໄດ້ເວົ້າກັບນິຄົນ ນາຕະບຸດແນວນີ້ວ່າ "ທ່ານຂ້ານ້ອຍ ອາສະນະມີຢູ່ ຖ້າທ່ານປະສົງກໍຈົ່ງນັ່ງເທີ້ນ"

ເມື່ອຄະຫະບໍດີກ່າວແນວນີ້ ນິຄົນ ນາຕະບຸດກໍເວົ້າວ່າ "ທ່ານບ້າ ຫຼື ໂງ່ກັນນໍ ຄະຫະບໍດີທ່ານເອງບອກກັບເຮົາວ່າ "ທ່ານຜູ້ຈະເລີນ ຂ້າພະເຈົ້າຈະໄປໂຕ້ວາທະກັບພຣະສະມະນະໂຄດົມ" ເມື່ອໄປແລ້ວ ທ່ານເອງກັບຖືກໃສ່ປາກດ້ວຍຕະກຣໍ້ຄືວາທະໃບໃຫຍ່ເສຍນີ້ ຊາຍຜູ້ມີອັນຖະແຕ່ຖືກຄວັກອັນຖະອອກເສຍທັງ ໒ ຂ້າງ ຫຼື ຄົນມີດວງຕາແຕ່ຖືກຄວັກດວງຕາອອກ ທັງ ໒ ຂ້າງ ແມ່ນສັນໃດ ທ່ານກໍສັນນັ້ນຄືກັນ ບອກວ່າ "ຈະໄປໂຕ້ວາທະກັບພຣະສະມະນະໂຄດົມ" ເມື່ອໄປແລ້ວ ກັບຖືກໃສ່ປາກດ້ວຍຕະກຣໍ້ຄືວາທະໃບໃຫຍ່ ພຣະສະມະນະໂຄດົມກັບໃຈທ່ານດ້ວຍມາຍາເປັນເຄື່ອງກັບໃຈແມ່ນບໍ?"

## ມາຍາເຄື່ອງກັບໃຈ

[໗໒] ອຸບາລິຄະຫະບໍດີຊີ້ແຈ່ງວ່າ "ທ່ານຂ້ານ້ອຍ ມາຍາເປັນເຄື່ອງກັບໃຈນີ້ດີແທ້ ມາຍາເປັນເຄື່ອງກັບໃຈນີ້ງາມຫຼາຍ ຍາດສາໂລຫິດຜູ້ເປັນທີ່ຮັກຂອງຂ້າພະເຈົ້າ ຫາກກັບໃຈໄດ້ດ້ວຍມາຍາເປັນເຄື່ອງກັບໃຈນີ້ ມາຍາເປັນເຄື່ອງກັບໃຈນີ້ກໍຈະເປັນໄປເພື່ອປະໂຫຍດ ເກື້ອກູນ ເພື່ອສຸກແກ່ຍາດສາໂລຫິດຜູ້ເປັນທີ່ຮັກຂອງຂ້າພະເຈົ້າໄປດົນແສນດົນ

ກະສັດທັງປວງ ຫາກກັບໃຈໄດ້ດ້ວຍມາຍາເປັນເຄື່ອງກັບໃຈນີ້ ມາຍາເຄື່ອງກັບໃຈນີ້ກໍຈະເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອສຸກແກ່ກະສັດທັງປວງໄປດົນແສນດົນ

ແມ່ນພາມທັງປວງ ໆລໆ

ແພດ ໗ລ໗

ສູດທັງປວງ ຫາກກັບໃຈໄດ້ດ້ວຍມາຍາເປັນເຄື່ອງກັບໃຈນີ້ ມາຍາເປັນເຄື່ອງກັບໃຈນີ້ກໍ ຈະເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອສຸກແກ່ສູດທັງປວງໄປດົນແສນດົນ

ແມ່ນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ຫາກກັບໃຈໄດ້ດ້ວຍມາຍາເປັນເຄື່ອງກັບໃຈນີ້ ມາຍາເປັນເຄື່ອງກັບໃຈນີ້ກໍ ຈະເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອສຸກແກ່ໂລກ ພ້ອມທັງເທວະໂລກ ມານໂລກ ພົມມະ ໂລກ ແກ່ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດໄປດົນແສນດົນ

ທ່ານຂ້ານ້ອຍ ຖ້າເຊັ່ນນັ້ນ ຂ້າພະເຈົ້າຈະອຸປະມາໃຫ້ທ່ານຟັງ ຍ້ອນວິນຍູຊົນລາງພວກ ໃນໂລກນີ້ຍ່ອມເຂົ້າໃຈຄວາມໝາຍແຫ່ງຄຳເວົ້າໄດ້ ແມ່ນດ້ວຍຂໍ້ອຸປະມາ

[໗໕] ທ່ານຂ້ານ້ອຍ ເລື້ອງເຄີຍມີມາແລ້ວ ສາວວັຍລຸ້ນພັນລະຍາຂອງພາມແກ່ເຖົ້າວັຍ ຊະຣາຄົນໜຶ່ງມີທ້ອງໃກ້ຄອດ ຕໍ່ມາ ພັນລະຍາສາວນັ້ນຈຶ່ງເວົ້າກັບພາມນັ້ນວ່າ “ອ້າຍພາມ ອ້າຍ ຈົ່ງໄປຊື້ລູກລິງຈາກຕະຫລາດມາຈັກໂຕໄວ້ເປັນເພື່ອນຫລິ້ນຂອງລູກເຮົາ” ເມື່ອນາງບອກແນວນັ້ນ ພາມນັ້ນກໍເວົ້າວ່າ “ນາງ ຖ້າຈົນຄອດເສຍກ່ອນເທີ້ນ ຖ້າທ່ານຄອດລູກເປັນຊາຍ ເຮົາກໍຈັກຊື້ລູກ ລິງໂຕຜູ້ຈາກຕະຫລາດມາໃຫ້ເປັນເພື່ອນຫລິ້ນຂອງລູກຊາຍທ່ານ ແຕ່ຖ້າທ່ານອອກລູກເປັນຍິງ ເຮົາກໍຈັກຊື້ລູກລິງໂຕເມຍຈາກຕະຫລາດມາໃຫ້ເປັນເພື່ອນຫລິ້ນຂອງລູກສາວທ່ານ”

ແມ່ນເທື່ອທີ ໒ ພັນລະຍາສາວກໍເວົ້າກັບພາມນັ້ນວ່າ “ອ້າຍພາມ ອ້າຍຈົ່ງໄປຊື້ ລູກລິງ ຈາກຕະຫລາດມາຈັກໂຕໄວ້ເປັນເພື່ອນຫລິ້ນຂອງລູກສັນ” ແມ່ນເທື່ອທີ ໒ ພາມກໍເວົ້າວ່າ “ນາງ ຖ້າຈົນຄອດເສຍກ່ອນເທີ້ນ ຖ້າທ່ານຄອດລູກເປັນຊາຍ ເຮົາກໍຈັກຊື້ລູກລິງໂຕຜູ້ຈາກຕະຫລາດມາ ໃຫ້ເປັນເພື່ອນຫລິ້ນຂອງລູກຊາຍທ່ານ ແຕ່ຖ້າທ່ານຄອດລູກເປັນຍິງ ເຮົາກໍຈັກຊື້ລູກລິງໂຕເມຍ ຈາກຕະຫລາດມາໃຫ້ເປັນເພື່ອນຫລິ້ນຂອງລູກສາວທ່ານ”

ແມ່ນເທື່ອທີ ໓ ພັນລະຍາສາວນັ້ນກໍເວົ້າກັບພາມນັ້ນວ່າ “ອ້າຍພາມ ອ້າຍຈົ່ງໄປຊື້ ລູກ ລິງຈາກຕະຫລາດມາຈັກໂຕໄວ້ເປັນເພື່ອນຫລິ້ນຂອງລູກສັນ” ກໍແລ ພາມແກ່ນັ້ນຫຼົງໄຫຼຮັກແພງ ພັນລະຍາສາວຈຶ່ງຊື້ລູກລິງຈາກຕະຫລາດມາແລ້ວບອກທ່ານວ່າ “ເຮົາຊື້ລູກລິງຈາກຕະຫລາດມາ ໄວ້ເປັນເພື່ອນຫລິ້ນຂອງລູກທ່ານແລ້ວນະ ນາງ” ເມື່ອພາມບອກແນວນີ້ແລ້ວ ພັນລະຍາສາວນັ້ນ ຈຶ່ງເວົ້າວ່າ “ອ້າຍພາມ ອ້າຍຈົ່ງອຸ້ມລູກລິງໂຕນີ້ໄປຫາລູກຊ່າງຍ້ອມຜູ້ຊ່ຽວຊານການຍ້ອມແລ້ວ ບອກເຂົາວ່າ “ເພື່ອນຜູ້ຊ່ຽວຊານການຍ້ອມ ເຮົາຢາກໃຫ້ທ່ານຍ້ອມລູກລິງໂຕນີ້ໃຫ້ສີຈັບແໜ້ນສະ ນິດດີ ຂັດແລ້ວຂັດອີກ ໃຫ້ຮຽບຮ້ອຍທັງສອງດ້ານ”

ພາມຜູ້ຫຼິງໄຫຼຮັກແພງພັນລະຍາສາວນັ້ນອຸ້ມລູກລີງໄປຫາລູກນາຍຊ່າງຍ້ອມຜູ້ຊ່ຽວຊານການຍ້ອມແລ້ວບອກວ່າ “ເພື່ອນຜູ້ຊ່ຽວຊານການຍ້ອມ ເຮົາຢາກໃຫ້ທ່ານຍ້ອມລູກລີງໂຕນີ້ໃຫ້ ສີຈັບແໜ້ນສະນິດດີ ຂັດແລ້ວຂັດອີກ ໃຫ້ຮຽບຮ້ອຍທັງສອງດ້ານ” ເມື່ອພາມກ່າວແນວນີ້ແລ້ວ ບຸດນາຍຊ່າງຍ້ອມຜູ້ຊ່ຽວຊານການຍ້ອມໄດ້ບອກວ່າ “ທ່ານຜູ້ຈະເລີນ ລູກລີງຂອງທ່ານນີ້ຄວນຍ້ອມສີທີ່ນັ້ນ ບໍ່ຄວນຂັດແລ້ວຂັດອີກ” ແມ່ນສັນໃດ ວາທະຂອງນິຄົນຜູ້ຈ້ຳກໍສັນນັ້ນຄືກັນ ຄວນເປັນທີ່ຍິນດີຂອງຄົນຈ້ຳນຳກັນທີ່ນັ້ນ ບໍ່ຄວນເປັນທີ່ຍິນດີ ບໍ່ຄວນ ຊັກຖາມ ແລະ ບໍ່ຄວນພິຈາລະນາຂອງບັນດິດທັງຫລາຍ

ທ່ານຜູ້ຈະເລີນ ຕໍ່ມາ ພາມນັ້ນຖືຜ້າໃໝ່ຄູ່ໜຶ່ງໄປຫາບຸດນາຍຊ່າງຍ້ອມຜູ້ຊ່ຽວຊານ ການຍ້ອມແລ້ວບອກກັບເຂົາວ່າ “ເພື່ອນຜູ້ຊ່ຽວຊານການຍ້ອມ ເຮົາຢາກໃຫ້ທ່ານຍ້ອມຜ້າໃໝ່ ຄູ່ນີ້ໃຫ້ສີຈັບແນວສະນິດດີ ຂັດແລ້ວຂັດອີກ ໃຫ້ຮຽບຮ້ອຍທັງສອງດ້ານ” ເມື່ອພາມບອກແນວນີ້ແລ້ວບຸດນາຍຊ່າງຍ້ອມຜູ້ຊ່ຽວຊານການຍ້ອມກໍໄດ້ບອກວ່າ “ທ່ານຜູ້ຈະເລີນ ຜ້າໃໝ່ຂອງທ່ານຄູ່ນີ້ ຄວນຍ້ອມຄວນຂັດແລ້ວຂັດອີກ” ແມ່ນສັນໃດ ວາທະຂອງພຣະຜູ້ມີພຣະພາກເຈົ້າ ອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ກໍສັນນັ້ນຄືກັນ ຄວນເປັນທີ່ຍິນດີຂອງບັນດິດທັງຫລາຍທີ່ນັ້ນ ບໍ່ຄວນເປັນທີ່ຍິນດີ ບໍ່ຄວນຊັກຖາມ ແລະ ບໍ່ຄວນພິຈາລະນາາຂອງຄົນຈ້ຳທັງຫລາຍ”

ນິຄົນ ນາຕະບຸດຖາມວ່າ “ຄະຫະບໍດີ ບໍລິສັດພ້ອມທັງພຣະຣາຊາຕ່າງໆກໍຮູ້ຈັກທ່ານ ແນວນີ້ວ່າ “ອຸບາລີຄະຫະບໍດີເປັນສາວົກຂອງນິຄົນ ນາຕະບຸດ” ເຮົາຈະຈື່ທ່ານວ່າ ເປັນສາວົກຂອງໃຜນໍ?”

ເມື່ອນິຄົນ ນາຕະບຸດກ່າວແນວນີ້ແລ້ວ ອຸບາລີຄະຫະບໍດີລຸກຈາກອາສະນະພາດສໄບບ່ຽງບ່າປະນົມມືໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ເວົ້າກັບນິຄົນນາຕະບຸດວ່າ “ທ່ານຂ້ານ້ອຍຖ້າເຊັ່ນນັ້ນ ທ່ານຈົ່ງຟັງການກ່າວສັນເສີນພຣະຄຸນຂອງພຣະຜູ້ມີພຣະພາກເຈົ້າຂອງຂ້າພະເຈົ້າຜູ້ເປັນສາວົກ” ແລ້ວກ່າວຄາຖາປະພັນດັ່ງຕໍ່ໄປນີ້ວ່າ

## ອຸບາລີຄະຫະບໍດີປະກາດຕົນເປັນພຸດທະສາວົກ

[໗໖] “ຂ້າພະເຈົ້າເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າຜູ້ເປັນປາດ
ປາສະຈາກໂມຫະ ຊົງທຳລາຍກິເລດເຄື່ອງຕຶງຈິດໄດ້
ຊົງຊະນະມານ ບໍ່ມີທຸກ ມີຈິດສະເໝີດ້ວຍດີ ມີມາຣະຍາດຈະເລີນ
ມີພຣະປັນຍາດີ ຊົງຂ້າມກິເລດອັນປາສະຈາກຄວາມສະເໝີ
(ແລະ) ປາສະຈາກມົນທິນໄດ້
ຂ້າພະເຈົ້າເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າຜູ້ບໍ່ມີຄວາມສົງໄສ

ມີພຣະຫະໄທດີ ຊຶ່ງຄາຍໂລກາມິດໄດ້ ຊຶ່ງບັນເທີງ
ຊຶ່ງຈະເລີນສະມະນະທຳສຳເລັດແລ້ວ ຊຶ່ງເກີດເປັນມະນຸດ
ມີພຣະສະຣີຣະເປັນຊາດສຸດທ້າຍ ຊຶ່ງເປັນນຣະບໍ່ມີຜູ້ປຽບໄດ້
ປາສະຈາກກິເລດພຽງດັງທຸລີ

ຂ້າພະເຈົ້າເປັນສາວິກາຂອງພຣະຜູ້ມີພຣະພາກເຈົ້າຜູ້ບໍ່ມີຄວາມສົງໄສ
ຊຶ່ງແຫຼມຄົມ ຜູ້ຊຶ່ງແນະນຳສັດ ຜູ້ເປັນສາຣະຖີຜູ້ປະເສີດ
ຜູ້ປະເສີດ ຊຶ່ງມີທຳງາມ ໝົດຄວາມເຄືອບແຄງ
ຊຶ່ງໃຫ້ແສງສະຫວ່າງ ຊຶ່ງຕັດມານະສາແລ້ວ ມີພຣະວິຣິຍະ

ຂ້າພະເຈົ້າເປັນສາວິກາຂອງພຣະຜູ້ມີພຣະພາກເຈົ້າຜູ້ອົງອາດ
ບໍ່ມີໃຜປະມານໄດ້ ມີພຣະຄຸນເລິກເຊິ່ງ ບັນລຸເຖິງຍານ
ຊຶ່ງທຳຄວາມກະເສມ ມີພຣະຍານ ດຳລົງຢູ່ໃນທຳ
ຊຶ່ງສັງລວມພຣະອົງດີແລ້ວ ລ່ວງກິເລດເຄື່ອງຂ້ອງ ລຸດພົ້ນແລ້ວ

ຂ້າພະເຈົ້າເປັນສາວິກາຂອງພຣະຜູ້ມີພຣະພາກເຈົ້າຜູ້ປະເສີດ
ຜູ້ຊຶ່ງມີເສນາສະນະອັນສະຫງັດ ສິ້ນສັງໂຍດແລ້ວ ລຸດພົ້ນແລ້ວ
ມີພຣະປັນຍາໂຕ້ຕອບ ມີພຣະປັນຍາຢັ່ງຮູ້
ຊຶ່ງລຸດທຸງຄືມານະສາແລ້ວ ປາສະຈາກຣາຄະ
ເປັນຜູ້ເຝິກແລ້ວ ເປັນຜູ້ປາສະຈາກທຳເຄື່ອງຢືດໜ່ວງ

ຂ້າພະເຈົ້າເປັນສາວິກາຂອງພຣະຜູ້ມີພຣະພາກເຈົ້າ
ຜູ້ເປັນພຣະສຳມາສຳພຸດທະເຈົ້າພຣະອົງທີ່ ໗
ຜູ້ບໍ່ລວງໂລກ ຊຶ່ງມີວິດຊາ ໓ ເປັນຜູ້ປະເສີດ
ຊຶ່ງຊຳຣະກິເລດແລ້ວ ປະສົມອັກສອນໃຫ້ເປັນບົດຄາຖາ
ຊຶ່ງສະງົບລະງັບ ມີພຣະຍານແຈ້ງຊັດ
ຊຶ່ງໃຫ້ທຳມະທານກ່ອນຜູ້ອື່ນທັງໝົດ ເປັນຜູ້ສາມາດ

ຂ້າພະເຈົ້າເປັນສາວິກາຂອງພຣະຜູ້ມີພຣະພາກເຈົ້າຜູ້ເປັນອະຣິຍະ
ມີພຣະອົງອົບຮົມແລ້ວ ບັນລຸຄຸນທີ່ຄວນບັນລຸ
ຊຶ່ງສະແດງອັດຖະໃຫ້ພິດສະດານ ມີພຣະສະຕິ
ຊຶ່ງເຫັນແຈ້ງ ບໍ່ຍຸບລົງ ບໍ່ຟູຂຶ້ນ
ບໍ່ຊຶ່ງຫວັ່ນໄຫວ ເປັນຜູ້ມີຄວາມຊ່ຽວຊານ

ຂ້າພະເຈົ້າເປັນສາວິກາຂອງພຣະຜູ້ມີພຣະພາກເຈົ້າຜູ້ສະເດັດໄປດີແລ້ວ
ຊຶ່ງມີຊານ ບໍ່ຊຶ່ງປ່ອຍພຣະຫະໄທໄປຕາມກະແສ
ເປັນຜູ້ມີດຈິດ ບໍ່ສະດຸ້ງ ປາສະຈາກຄວາມຢ້ານ

ສະງົບຢູ່ຜູ້ດຽວ ຊົງບັນລຸທຳອັນເລີດ
ຊົງຂ້າມພົ້ນເອງ ຊົງຍັງສັດອື່ນໃຫ້ຂ້າມພົ້ນດ້ວຍ
ຂ້າພະເຈົ້າເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າຜູ້ສະງົບແລ້ວ
ມີພຣະປັນຍາກວ້າງໃຫຍ່ສະເໝີດ້ວຍແຜ່ນດິນ
ມີພຣະປັນຍາໃຫຍ່ຫລວງ ປາສະຈາກຄວາມໂລບ
ຊົງດຳເນີນປະຕິປະທາຄືພຣະພຸດທະເຈົ້າໃນປາງກ່ອນ
ສະເດັດໄປດີ ບໍ່ມີບຸກຄົນປຽບ ບໍ່ມີຜູ້ສະເໝີຄື
ຊົງແກ່ກ້າ ເປັນຜູ້ລະອຽດ ສຸຂຸມ
ຂ້າພະເຈົ້າເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າ
ຜູ້ຕັດຕັນຫາໄດ້ເດັດຂາດ ຜູ້ຕື່ນ ປາສະຈາກຄວັນ
ຜູ້ບໍ່ຖືກຕັນຫາແລະທິດຖິສາບທາ ຜູ້ຄວນບູຊາ
ຜູ້ຊົງໄດ້ຮັບພຣະນາມວ່າຍັກຂະ໑ ເປັນບຸກຄົນຜູ້ສູງສຸດ
ມີພຣະຄຸນສ່ວນບໍ່ໄດ້ ເປັນຜູ້ໃຫຍ່ຍິ່ງ
ບັນລຸຍົດແນວປະເສີດ”

[໗໗] ນິຄົນ ນາຕະບຸດຖາມວ່າ “ຄະຫະບໍດີ ທ່ານປະມວນຄຳເວົ້າສຳລັບພັນລະນາຄຸນຂອງພຣະສະມະນະໂຄດົມໄວ້ຕັ້ງແຕ່ເມື່ອໃດ?”

ອຸບາລີຄະຫະບໍດີຕອບວ່າ “ທ່ານຂ້ານ້ອຍ ຊ່າງດອກໄມ້ ຫຼື ລູກມືຊ່າງດອກໄມ້ຜູ້ຊ່ຽວຊານ ເພິ່ງຮ້ອຍດອກໄມ້ຕ່າງ ໆ ກອງໃຫຍ່ໃຫ້ເປັນພວງມາໄລອັນວິຈິດໄດ້ ແມ່ນສັນໃດ ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນກໍສັນນັ້ນຄືກັນ ຊົງມີພຣະຄຸນຄວນພັນນາເປັນອະເນກ ຊົງມີພຣະຄຸນຄວນພັນນາໄດ້ຫຼາຍຮ້ອຍ ໃຜບໍຈັກພັນນາບໍ່ໄດ້ເຖິງພຣະຄຸນຂອງພຣະອົງຜູ້ຄວນພັນນາ”

ຈາກນັ້ນ ນິຄົນ ນາຕະບຸດທົນເບິ່ງສັກກາຣະຂອງພຣະຜູ້ມີພຣະພາກເຈົ້າບໍ່ໄດ້ ຈຶ່ງກະອັກໂລຫິດອຸ່ນອອກຈາກປາກ ໃນບ່ອນນັ້ນເອງ ດັ່ງນີ້ແລ

**ອຸປາລີວາທະສູດທີ ໖ ຈົບ**

# ໗. ກຸກກຸຣະວະຕິກະສູດ

## ວ່າດ້ວຍການປະພຶດຂໍ້ວັດປະຕິບັດເອົາແບບຢ່າງໝາ

[໗໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ນິຄົມຂອງຊາວໂກລິຍະຊື່ຫະລິທທະວະສະນະ ແຄວ້ນໂກລິຍະ ຄັ້ງນັ້ນແລ ບຸດຂອງຊາວໂກລິຍະຊື່ປຸນນະຜູ້ປະພຶດໂຄວັດ ແລະ ຊີເປືອຍຊື່ເສນິຍະຜູ້ປະພຶດກຸກກຸຣະຂໍ້ວັດປະຕິບັດ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ນາຍປຸນນະ ໂກລິຍະບຸດ ຜູ້ປະພຶດໂຄວັດ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ສ່ວນຊີເປືອຍຊື່ເສນິຍະຜູ້ປະພຶດກຸກກຸຣະຂໍ້ວັດປະຕິບັດ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ກໍສະແດງທ່າເຄຍຄືໝາແລ້ວນັ່ງຢູ່ບ່ອນທີ່ສົມຄວນ

ນາຍປຸນນະ ໂກລິຍະບຸດຜູ້ປະພຶດໂຄວັດໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຊີເປືອຍຊື່ເສນິຍະ ຜູ້ປະພຶດກຸກກຸຣະຂໍ້ວັດປະຕິບັດນີ້ ເຮັດສິ່ງທີ່ຜູ້ອື່ນເຮັດໄດ້ຍາກ ກິນອາຫານທີ່ເຂົາກອງໄວ້ເທິງພື້ນດິນ ເຂົາສະມາທານກຸກກຸຣະຂໍ້ວັດປະຕິບັດນັ້ນແນວສົມບູນແບບມາດົນແລ້ວ ຄະຕິຂອງເຂົາຈັກເປັນແນວໃດ? ພົບໜ້າຂອງເຂົາຈັກເປັນແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດຫ້າມວ່າ "ຢ່າເລີຍ ປຸນນະ ທ່ານຈົ່ງງົດເລື້ອງນີ້ສາເທີ້ນ ຢ່າຖາມເຮົາເຖິງເລື້ອງນີ້ເລີຍ"

ແມ່ນເທື່ອທີ ໒ ນາຍປຸນນະ ໂກລິຍະບຸດຜູ້ປະພຶດໂຄວັດກໍໄດ້ທູນຖາມພຣະຜູ້ມີ ພຣະພາກ ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຊີເປືອຍຊື່ເສນິຍະນີ້ ຜູ້ປະພຶດກຸກກຸຣະຂໍ້ວັດປະຕິບັດ ເຮັດສິ່ງທີ່ ຜູ້ອື່ນເຮັດໄດ້ຍາກ ກິນອາຫານທີ່ເຂົາກອງໄວ້ເທິງພື້ນດິນ ເຂົາສະມາທານກຸກກຸຣະຂໍ້ວັດປະຕິບັດແນວສົມບູນແບບມາດົນແລ້ວ ຄະຕິຂອງເຂົາຈັກເປັນແນວໃດ? ພົບໜ້າຂອງເຂົາຈັກເປັນແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດຫ້າມວ່າ "ຢ່າເລີຍ ປຸນນະ ທ່ານຈົ່ງງົດເລື້ອງນີ້ສາເທີ້ນ ຢ່າຖາມເຮົາເຖິງເລື້ອງນີ້ເລີຍ"

ແມ່ນເທື່ອທີ ໓ ນາຍປຸນນະ ໂກລິຍະບຸດຜູ້ປະພຶດໂຄວັດ ກໍໄດ້ທູນຖາມພຣະຜູ້ມີພຣະພາກ ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຊີເປືອຍຊື່ເສນິຍະຜູ້ປະພຶດກຸກກຸຣະຂໍ້ວັດປະຕິບັດ ເຮັດສິ່ງທີ່ຜູ້ອື່ນເຮັດໄດ້ຍາກ ກິນອາຫານທີ່ເຂົາກອງໄວ້ເທິງພື້ນດິນ ເຂົາສະມາທານກຸກກຸຣະຂໍ້ວັດປະຕິບັດແນວສົມບູນແບບມາດົນແລ້ວ ຄະຕິຂອງເຂົາຈັກເປັນແນວໃດ? ພົບໜ້າຂອງເຂົາຈັກເປັນແນວໃດ?"

## ຄະຕິຂອງບຸກຄົນຜູ້ປະພຶດໂຄວັດແລະກຸກກຸຣະຂໍ້ວັດປະຕິບັດ

[໘໙] ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ປຸນນະ ເຮົາຫ້າມທ່ານບໍ່ໄດ້ແນ່ວ່າ "ຢ່າເລີຍ ປຸນນະ ທ່ານຈົ່ງງົດເລື້ອງນີ້ສາເທີ້ນ ຢ່າຖາມເຮົາເຖິງເລື້ອງນີ້ເລີຍ" ແຕ່ເຮົາຈັກຊີ້ແຈ່ງໃຫ້ທ່ານຟັງ

ບຸກຄົນລາງຄົນໃນໂລກນີ້ພ່ຳເພັງກຸກກຸຣະຂໍ້ວັດປະຕິບັດ ພ່ຳເພັງຕົນຕາມປົກກະຕິແບບໝາ ພ່ຳເພັງຈິດແບບໝາ ພ່ຳເພັງກິຣິຍາອາການແບບໝາແນວສົມບູນບໍ່ຂາດສາຍ ເມື່ອພ່ຳເພັງກຸກກຸຣະຂໍ້ວັດປະຕິບັດ ພ່ຳເພັງຕົນຕາມປົກກະຕິແບບໝາ ພ່ຳເພັງຈິດແບບໝາ ພ່ຳເພັງກິຣິຍາອາການແບບໝາແນວສົມບູນບໍ່ຂາດສາຍແລ້ວ ຫລັງຈາກຕາຍໄປ ເຂົາຍ່ອມໄປເກີດໃນໝູ່ໝາ ອັນໜຶ່ງຖ້າເຂົາມີທິດຖິແນວນີ້ວ່າ "ເຮົາຈັກເປັນເທວະດາ ຫຼື ເທບອົງໃດອົງໜຶ່ງດ້ວຍສິນ ຂໍ້ວັດປະຕິບັດ ຕະບະຫຼືພົມມະຈັນນີ້" ທິດຖິຂອງເຂົານັ້ນຈັດເປັນມິດສາທິດຖິ ເຮົາກ່າວວ່າ ຄະຕິຂອງຜູ້ມີມິດສາທິດຖິ ມີ ໒ ແນວ ຄື (໑) ນະຮົກ (໒) ກຳເນີດສັດເດຍຣັດສານ

ປຸນນະ ກຸກກຸຣະຂໍ້ວັດປະຕິບັດເມື່ອໃຜປະພຶດສົມບູນ ຍ່ອມນຳໄປເກີດໃນໝູ່ໝາ ເມື່ອປະພຶດບົກຜ່ອງ ຍ່ອມນຳໄປເກີດໃນນະຮົກ ດ້ວຍປະການແນວນີ້"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ຊີເປືອຍຊື່ເສນີຍະຜູ້ປະພຶດກຸກກຸຣະຂໍ້ວັດປະຕິບັດຈຶ່ງວ່າຮ້ອງໄຫ້ນ້ຳຕານອງໜ້າ

ຕໍ່ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບນາຍປຸນນະ ໂກລິຍະບຸດ ຜູ້ປະພຶດໂຄວັດວ່າ "ປຸນນະ ເຮົາຫ້າມທ່ານບໍ່ໄດ້ແນ່ວ່າ "ຢ່າເລີຍ ປຸນນະ ທ່ານຈົ່ງງົດເລື້ອງນີ້ສາເທີ້ນ ຢ່າຖາມເຮົາເຖິງເລື້ອງນີ້ເລີຍ"

ຊີເປືອຍຊື່ເສນີຍະຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ໄດ້ຮ້ອງໄຫ້ເຖິງເລື້ອງທີ່ພຣະຜູ້ມີພຣະພາກເຈົ້າຕັດກັບຂ້າພຣະອົງ ແມ່ນຂ້າພຣະອົງຈະສະມາທານກຸກກຸຣະຂໍ້ວັດປະຕິບັດນີ້ແນວສົມບູນແບບມາຊ້າດົນແລ້ວ ຂ້າແດ່ ພຣະອົງຜູ້ຈະເລີນ ນາຍປຸນນະ ໂກລິຍະບຸດ ຜູ້ປະພຶດໂຄວັດ ສະມາທານໂຄວັດນັ້ນແນວສົມບູນແບບມາດົນແລ້ວ ຄະຕິຂອງເຂົາຈັກເປັນແນວໃດ ພົບໜ້າຂອງເຂົາຈັກເປັນແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຢ່າເລີຍ ເສນີຍະ ທ່ານຈົ່ງງົດເລື້ອງນີ້ສາເທີ້ນ ຢ່າຖາມເຮົາເຖິງເລື້ອງນີ້ເລີຍ"

ແມ່ນເທື່ອທີ ໒ ຊີເປືອຍຊື່ເສນີຍະກໍໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ໗ລ໗

ແມ່ນເທື່ອທີ ໓ ຊີເປືອຍຊື່ເສນີຍະຜູ້ປະພຶດກຸກກຸຣະຂໍ້ວັດປະຕິບັດ ກໍໄດ້ທູນຖາມພຣະຜູ້ມີພຣະພາກວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ນາຍປຸນນະ ໂກລິຍະບຸດ ສະມາທານໂຄວັດນັ້ນແນວສົມບູນແບບມາຊ້າດົນແລ້ວ ຄະຕິຂອງເຂົາຈັກເປັນແນວໃດ? ພົບໜ້າຂອງເຂົາຈັກເປັນແນວໃດ?"

[໗໐] ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ເສນີຍະ ເຮົາຫ້າມທ່ານບໍ່ໄດ້ແນ່ວ່າ "ຢ່າເລີຍ

ເສນີຍະ ທ່ານຈົ່ງງົດເລື້ອງນີ້ສາເທີ້ນ ຢ່າຖາມເຮົາເຖິງເລື້ອງນີ້ເລີຍ" ແຕ່ເຮົາຈັກຊີ້ແຈ້ງໃຫ້ທ່ານຟັງ ບຸກຄົນລາງຄົນໃນໂລກນີ້ພໍ່າເພັງໂຄວັດ ພໍ່າເພັງຕົນຕາມປົກກະຕິແບບງົວ ພໍ່າເພັງຈິດແບບງົວ ພໍ່າເພັງກິຣິຍາອາການແບບງົວແນວສົມບູນບໍ່ຂາດສາຍ ເມື່ອພໍ່າເພັງໂຄວັດ ພໍ່າເພັງຕົນຕາມປົກກະຕິແບບງົວ ພໍ່າເພັງຈິດແບບງົວ ພໍ່າເພັງກິຣິຍາອາການແບບງົວແນວສົມບູນບໍ່ຂາດສາຍແລ້ວ ຫລັງຈາກຕາຍໄປ ຍ່ອມໄປເກີດໃນໝູ່ງົວ ອັນໜຶ່ງ ຖ້າເຂົາມີທິດຖິແນວນີ້ວ່າ "ເຮົາຈັກເປັນເທວະດາ ຫຼື ເທບອົງໃດອົງໜຶ່ງດ້ວຍສີນ ຂໍ້ວັດປະຕິບັດ ຕະບະ ຫຼື ພົມມະຈັນນີ້" ທິດຖິຂອງເຂົານັ້ນຈັດເປັນມິດສາທິດຖິ ເຮົາກ່າວວ່າ ຄະຕິຂອງຜູ້ມີມິດສາທິດຖິມີ ໒ ແນວ ຄື (໑) ນະຣົກ (໒) ກຳເນີດສັດເດຍຣັດສານ

ເສນີຍະ ໂຄວັດເມື່ອໃຜປະພຶດສົມບູນ ຍ່ອມນຳໄປເກີດໃນໝູ່ງົວ ເມື່ອປະພຶດບົກຜ່ອງຍ່ອມນຳໄປເກີດໃນນະຣົກ ດ້ວຍປະການແນວນີ້"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ນາຍປຸນນະ ໂກລິຍະບຸດຜູ້ປະພຶດໂຄວັດຈົ່ນວ່າ ຮ້ອງໄຫ້ນໍ້າຕານອງໜ້າ

ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບຊີເປືອຍຊື່ເສນີຍະຜູ້ປະພຶດກຸກກຸຣະວັດວ່າ "ເສນີຍະ ເຮົາຫ້າມທ່ານບໍ່ໄດ້ແນ່ວ່າ "ຢ່າເລີຍ ເສນີຍະ ທ່ານຈົ່ງງົດເລື້ອງນີ້ສາເທີ້ນ ຢ່າຖາມເຮົາເຖິງເລື້ອງນີ້ເລີຍ"

ນາຍປຸນນະ ໂກລິຍະບຸດຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ໄດ້ຮ້ອງໄຫ້ເຖິງເລື້ອງທີ່ພຣະຜູ້ມີພຣະພາກເຈົ້າຕັດກັບຂ້າພຣະອົງ ແມ່ນຂ້າພຣະອົງຈະສະມາທານໂຄວັດນີ້ແນວສົມບູນແບບມາຊ້າດົນແລ້ວ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເຫຼື້ອມໃສໃນ ພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ພຣະຜູ້ມີພຣະພາກເຈົ້າທໍ່ນັ້ນ ຊົງສາມາດສະແດງທຳໂດຍວິທີທີ່ຂ້າພຣະອົງຈະເພິ່ງລະໂຄວັດນີ້ໄດ້ ແລະ ຊີເປືອຍຊື່ເສນີຍະຜູ້ປະພຶດກຸກກຸຣະຂໍ້ວັດປະຕິບັດຈະເພິ່ງລະກຸກກຸຣະຂໍ້ວັດປະຕິບັດນັ້ນໄດ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ປຸນນະ ຖ້າເຊັ່ນນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ນາຍປຸນນະ ໂກລິຍະບຸດ ຜູ້ປະພຶດໂຄວັດ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

## ກຳ ໔ ປະການ

[໘໑] "ປຸນນະ ກຳ ໔ ປະການນີ້ ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວ ຈຶ່ງປະກາດໃຫ້ຜູ້ອື່ນຮູ້ຕາມ

ກຳ ໔ ປະການ ອັນໃດແດ່ ຄື

໑. ກຳດຳມີວິບາກດຳ

໒. ກຳຂາວມີວິບາກຂາວ

໓. ກຳທັງດຳແລະຂາວ ມີວິບາກທັງດຳແລະຂາວ

໔. ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວເປັນໄປເພື່ອຄວາມສິ້ນກຳ

ກຳດຳມີວິບາກດຳ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ປຸງແຕ່ງກາຍສັງຂານທີ່ມີຄວາມບຽດບຽນກາປຸງແຕ່ງວະຈີສັງຂານຕູທີ່ມີຄວາມບຽດບຽນ ແລະ ປຸງແຕ່ງມະໂນສັງຂານຜທີ່ມີຄວາມບຽດບຽນ ເຂົາເມື່ອປຸງແຕ່ງແລ້ວຍ່ອມເຂົ້າເຖິງໂລກທີ່ມີຄວາມບຽດບຽນ ຜັດສະທີ່ມີຄວາມບຽດບຽນຍ່ອມຖືກຕ້ອງບຸກຄົນຜູ້ເຂົ້າເຖິງໂລກທີ່ມີຄວາມບຽດບຽນນັ້ນ ເຂົາຖືກຜັດສະທີ່ມີຄວາມບຽດບຽນກະທົບເຂົ້າ ຍ່ອມສະເຫວີຍເວທະນາທີ່ມີຄວາມບຽດບຽນ ເປັນທຸກໂດຍສ່ວນດຽວ ຄື ສັດນະຣົກທັງຫລາຍ

ປຸນນະ ຍ້ອນກຳທີ່ມີດັ່ງນີ້ແລ ຄວາມເກີດຂຶ້ນຂອງສັດຈຶ່ງມີໄດ້ ສັດຍ່ອມເກີດຂຶ້ນ ຍ້ອນກຳທີ່ເຮັດໄວ້ ຜັດສະຍ່ອມຖືກຕ້ອງສັດຜູ້ເກີດແລ້ວນັ້ນ ເຮົາຈຶ່ງກ່າວແນວນີ້ວ່າ "ສັດທັງຫລາຍເປັນຜູ້ຮັບຜົນກຳ" ນີ້ຮຽກວ່າ ກຳດຳມີວິບາກດຳ (໑)

ກຳຂາວມີວິບາກຂາວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ປຸງແຕ່ງກາຍສັງຂານທີ່ບໍ່ມີຄວາມບຽດບຽນ ປຸງແຕ່ງວະຈີສັງຂານທີ່ບໍ່ມີຄວາມບຽດບຽນ ແລະ ປຸງແຕ່ງມະໂນສັງຂານທີ່ບໍ່ມີຄວາມບຽດບຽນ ເຂົາເມື່ອປຸງແຕ່ງແລ້ວຍ່ອມເຂົ້າເຖິງໂລກທີ່ບໍ່ມີຄວາມບຽດບຽນ ຜັດສະທີ່ບໍ່ມີຄວາມບຽດບຽນ ຍ່ອມຖືກຕ້ອງບຸກຄົນຜູ້ເຂົ້າເຖິງໂລກທີ່ບໍ່ມີຄວາມບຽດບຽນນັ້ນ ເຂົາຖືກຜັດສະທີ່ບໍ່ມີຄວາມບຽດບຽນກະທົບເຂົ້າຍ່ອມສະເຫວີຍເວທະນາທີ່ບໍ່ມີຄວາມບຽດບຽນ ເປັນສຸກໂດຍສ່ວນດຽວ ຄື ເທບທັງຫລາຍຊັ້ນສຸພະກິນຫະ

ປຸນນະ ຍ້ອນກຳທີ່ມີດັ່ງນີ້ແລ ຄວາມເກີດຂຶ້ນຂອງສັດຈຶ່ງມີໄດ້ ສັດຍ່ອມເກີດຂຶ້ນ ຍ້ອນກຳທີ່ເຮັດໄວ້ ຜັດສະຍ່ອມຖືກຕ້ອງສັດຜູ້ເກີດແລ້ວນັ້ນ ເຮົາຈຶ່ງກ່າວແນວນີ້ວ່າ "ສັດທັງຫລາຍເປັນຜູ້ຮັບຜົນກຳ" ນີ້ຮຽກວ່າ ກຳຂາວມີວິບາກຂາວ (໒)

ກຳທັງດຳແລະຂາວມີວິບາກທັງດຳແລະຂາວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ປຸງແຕ່ງກາຍສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມ

ບຽດບຽນແດ່ ປຸງແຕ່ງວະຈີສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ແລະປຸງແຕ່ງມະໂນສັງຂານທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ເຂົາເມື່ອ ປຸງແຕ່ງແລ້ວຍ່ອມເຂົ້າເຖິງໂລກທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ຜັດສະທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ຍ່ອມຖືກຕ້ອງບຸກຄົນຜູ້ເຂົ້າເຖິງໂລກທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ນັ້ນ ເຂົາຖືກຜັດສະທີ່ມີຄວາມ ບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ກະທົບເຂົ້າຍ່ອມສະເຫວີຍເວທະນາທີ່ມີຄວາມບຽດບຽນແດ່ ບໍ່ມີຄວາມບຽດບຽນແດ່ ມີສຸກແລະທຸກຜະສົມກັນຄືມະນຸດ ເທວະດາລາງພວກ ແລະວິນິປາຕິກະລາງພວກ

ປຸນນະ ຍ້ອນກຳທີ່ມີດັ່ງນີ້ແລ ຄວາມເກີດຂຶ້ນຂອງສັດຈຶ່ງມີໄດ້ ສັດຍ່ອມ ເກີດຂຶ້ນຍ້ອນກຳທີ່ເຮັດໄວ້ ຜັດສະຍ່ອມຖືກຕ້ອງສັດຜູ້ເກີດແລ້ວນັ້ນ ເຮົາຈຶ່ງກ່າວ ແນວນີ້ວ່າ "ສັດທັງຫລາຍເປັນຜູ້ຮັບຜົນກຳ" ນີ້ຮຽກວ່າ ກຳທັງດຳແລະຂາວ ມີວິບາກ ທັງດຳແລະຂາວ (໓)

ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງບໍ່ດຳແລະບໍ່ຂາວ ເປັນໄປເພື່ອຄວາມສິ້ນກຳ ເປັນແນວໃດ?

ຄື ບັນດາກຳເຫຼົ່ານັ້ນ ເຈຕະນາໝເພື່ອລະກຳດຳທີ່ມີວິບາກດຳ ເຈຕະນາເພື່ອລະ ກຳຂາວທີ່ມີວິບາກຂາວ ແລະ ເຈຕະນາເພື່ອລະກຳທັງດຳແລະຂາວ ທີ່ມີວິບາກທັງດຳແລະຂາວ

ປຸນນະ ຍ້ອນກຳທີ່ມີດັ່ງນີ້ແລ ຄວາມເກີດຂຶ້ນຂອງສັດຈຶ່ງມີໄດ້ ສັດຍ່ອມເກີດຂຶ້ນຍ້ອນກຳທີ່ເຮັດໄວ້ ຜັດສະຍ່ອມຖືກຕ້ອງສັດຜູ້ເກີດແລ້ວນັ້ນ ເຮົາຈຶ່ງກ່າວແນວນີ້ວ່າ "ສັດທັງຫລາຍເປັນຜູ້ຮັບຜົນກຳ" ນີ້ຮຽກວ່າ ກຳທັງບໍ່ດຳແລະບໍ່ຂາວ ມີວິບາກທັງ ບໍ່ດຳແລະບໍ່ຂາວເປັນໄປເພື່ອຄວາມສິ້ນກຳ

ປຸນນະ ກຳ ໔ ປະການນີ້ແລ ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງ ແລ້ວຈຶ່ງປະກາດໃຫ້ຜູ້ອື່ນຮູ້ຕາມ (໔)"

## ນາຍປຸນນະສະແດງຕົນເປັນອຸປາສົກແລະເສນີຍະຊີເປືອຍຂໍບວດ

[໗໘] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ນາຍປຸນນະ ໂກລິຍະບຸດ ຜູ້ປະພຶດໂຄວັດ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫລົງທາງ ຫຼືເຍືອງໄຟໃນບ່ອນມືດ ດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ຂໍເຖິງ

ພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

ສ່ວນຊີເປືອຍຊື່ເສນິຍະ ຜູ້ປະພຶດກຸກກຸຣະຂໍ້ວັດ ປະຕິບັດໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນນ່ອນຫຼາຍ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນນ່ອນຫຼາຍ ທ່ານພຣະໂຄດົມຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫລົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂ້າພຣະອົງເພິ່ງໄດ້ບັນພະຊາອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເສນິຍະ ຜູ້ເຄີຍເປັນອັນຍະເດຍຣະຖີປະສົງຈະບັນພະຊາອຸປະສົມບົດໃນທຳວິໄນນີ້ ຈະຕ້ອງຢູ່ປະຣິວາດ ໔ ເດືອນ ຫລັງຈາກ ໔ ເດືອນລ່ວງໄປແລ້ວເມື່ອພິກຂຸພໍໃຈກໍຈະໃຫ້ບັນພະຊາອຸປະສົມບົດເປັນພິກຂຸ ອັນໜຶ່ງ ໃນເລື້ອງນີ້ ເຮົາຄຳນຶງເຖິງຄວາມແຕກຕ່າງລະຫວ່າງບຸກຄົນດ້ວຍ"

ເຂົາຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຫາກຜູ້ເຄີຍເປັນອັນຍະເດຍຣະຖີປະສົງຈະບັນພະຊາອຸປະສົມບົດໃນພຣະທຳວິໄນນີ້ ຈະຕ້ອງຢູ່ປະຣິວາດ໑ ໔ ເດືອນ ຫລັງຈາກ ໔ ເດືອນລ່ວງໄປແລ້ວ ເມື່ອພິກຂຸພໍໃຈກໍຈະໃຫ້ບັນພະຊາອຸປະສົມບົດເປັນພິກຂຸ ຂ້າພຣະອົງຈັກຂໍຢູ່ ປະຣິວາດ ໔ ປີ ຫລັງຈາກ ໔ ປີລ່ວງໄປແລ້ວ ເມື່ອພິກຂຸພໍໃຈກໍຈົ່ງໃຫ້ບັນພະຊາອຸປະສົມບົດເປັນພິກຂຸເທີ້ນ"

ຊີເປືອຍຊື່ເສນິຍະຜູ້ປະພຶດກຸກກຸຣະຂໍ້ວັດປະຕິບັດ ໄດ້ບັນພະຊາອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ເມື່ອບວດແລ້ວບໍ່ດົນ ຈາກໄປຢູ່ຜູ້ດຽວ ບໍ່ຜະໝາດ ມີຄວາມພຽນອຸທິດກາຍແລະໃຈຢູ່ ບໍ່ດົນປານໃດໄດ້ເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດ ຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ຈຶ່ງເປັນອັນວ່າ ທ່ານພຣະເສນິຍະໄດ້ເປັນພຣະອະຣະຫັນອົງໜຶ່ງໃນບັນດາພຣະອະຣະຫັນທັງຫລາຍ ດັ່ງນີ້ແລ

**ກຸກກຸຣະວະຕິກະສູດທີ່ ໗ ຈົບ**

# ໗. ອະພະຍະຣາຊະກຸມາຣະສູດ

## ວ່າດ້ວຍພຣະຣາດຊະກຸມານພຣະນາມວ່າອະໄພ

[໗໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄື ຄັ້ງນັ້ນແລ ພຣະຣາດຊະກຸມານພຣະນາມວ່າ ອະໄພສະເດັດເຂົ້າໄປຫາ ນິຄົນນາຕະບຸດຮອດບ່ອນຢູ່ ຊົງໄຫວ້ນິຄົນ ນາຕະບຸດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ນິຄົນ ນາຕະບຸດໄດ້ທູນອະໄພຣາດຊະກຸມານ ວ່າ

“ສະເດັດໄປເທີ້ນ ພຣະຣາດຊະກຸມານ ເຊີນພຣະອົງສະເດັດໄປໂຕ້ວາທະກັບພຣະ ສະມະນະໂຄດົມເທີ້ນ ເມື່ອພຣະອົງຊົງໂຕ້ວາທະກັບພຣະສະມະນະໂຄດົມແນວນີ້ແລ້ວ ກິດຕິສັບ ອັນງາມຂອງພຣະອົງຈັກຣະບືໄປວ່າ “ອະໄພຣາດຊະກຸມານຊົງໂຕ້ວາທະກັບພຣະສະມະນະໂຄ ດົມຜູ້ມີລິດຫຼາຍ ມີອານຸພາບຫຼາຍແນວນີ້”

ອະໄພຣາດຊະກຸມານຕັດຖາມວ່າ “ທ່ານຜູ້ຈະເລີນ ຂ້າພະເຈົ້າຈະໂຕ້ວາທະກັບພຣະ ສະມະນະໂຄດົມ ຜູ້ມີລິດຫຼາຍ ມີອານຸພາບຫຼາຍ ໄດ້ແນວໃດ”

ນິຄົນ ນາຕະບຸດທູນຕອບວ່າ “ມາເທີ້ນພຣະຣາດຊະກຸມານ ເຊີນພຣະອົງສະເດັດເຂົ້າ ໄປເຝົ້າພຣະສະມະນະໂຄດົມຮອດບ່ອນຢູ່ ແລ້ວ ຕັດຖາມພຣະສະມະນະໂຄດົມແນວນີ້ວ່າ “ຂ້າ ແດ່ພຣະອົງຜູ້ຈະເລີນ ມີແດ່ບໍ ທີ່ພຣະຕະຖາຄົດຕັດວາຈາອັນບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງ ຄົນອື່ນ” ຖ້າພຣະສະມະນະໂຄດົມຖືກຖາມແນວນີ້ແລ້ວຈະຊົງຕອບວ່າ “ຣາດຊະກຸມານ ມີບ້າງທີ່ ຕະຖາຄົດກ່າວວາຈາອັນບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນອື່ນ”

ພຣະອົງເພິ່ງທູນຖາມພຣະສະມະນະໂຄດົມແນວນີ້ ວ່າ “ຂ້າແດ່ ພຣະອົງຜູ້ຈະເລີນເມື່ອ ເປັນເຊັ່ນນັ້ນ ການກະທຳຂອງພຣະອົງຈະຕ່າງອັນໃດຈາກປຸຖຸຊົນ ຍ້ອນປຸຖຸຊົນກໍກ່າວວາຈາອັນບໍ່ ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນອື່ນ” ຖ້າພຣະສະມະນະໂຄດົມຖືກຖາມແນວນີ້ແລ້ວ ຈະຊົງ ຕອບວ່າ “ຣາດຊະກຸມານ ຕະຖາຄົດບໍ່ກ່າວວາຈາອັນບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນອື່ນ”

ພຣະອົງເພິ່ງທູນຖາມພຣະສະມະນະໂຄດົມແນວນີ້ວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອ ເປັນເຊັ່ນນັ້ນ ຍ້ອນເຫດໃດ ພຣະອົງຈຶ່ງຊົງພະຍາກອນພຣະເທວະທັດວ່າ “ເທວະທັດຈັກເກີດໃນ ອະບາຍ ຈັກເກີດໃນນະຣົກ ດຳລົງຢູ່ສິ້ນ ໑ ກັບ ເປັນຜູ້ທີ່ໃຜ ໆ ບຳລຸງບໍ່ໄດ້ ຍ້ອນວາຈາຂອງ ພຣະອົງນັ້ນ ພຣະເທວະທັດໂກດ ເສຍໃຈ”

ພຣະຣາດຊະກຸມານ ພຣະສະມະນະໂຄດົມຖືກພຣະອົງທູນຖາມບັນຫາ ໘ ເງື່ອນນີ້ແລ້ວ ຈະຊົງກືນບໍ່ເຂົ້າ ຄາຍບໍ່ອອກ ກະຈັບເຫລັກຕິດຢູ່ໃນລຳຄໍຂອງບຸຣຸດ ບຸຣຸດນັ້ນບໍ່ອາດກືນ ເຂົ້າໄປ ບໍ່ອາດຄາຍອອກ ແມ່ນສັນໃດ ພຣະສະມະນະໂຄດົມກໍສັນນັ້ນຄືກັນ ຖືກພຣະອົງທູນຖາມບັນຫາ ໘ ເງື່ອນນີ້ແລ້ວກໍຈະຊົງກືນບໍ່ເຂົ້າ ຄາຍບໍ່ອອກ"

ອະໄພຣາດຊະກຸມານຊົງຮັບຄຳນິຄົນ ນາຕະບຸດແລ້ວສະເດັດລຸກຈາກທີ່ປະທັບຊົງໄຫວ້ ນິຄົນ ນາຕະບຸດ ກະທຳປະທັກຂິນແລ້ວ ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວ ປະທັບນັ່ງຢູ່ບ່ອນທີ່ສົມຄວນ

[໙໔] ອະໄພຣາດຊະກຸມານປະທັບນັ່ງຢູ່ບ່ອນທີ່ສົມຄວນແລ້ວ ຊົງແຫງນເບິ່ງດວງອາທິດ ຊົງດຳຣິວ່າ "ມື້ນີ້ບໍ່ແມ່ນເວລາສົມຄວນທີ່ຈະໂຕ້ວາທະກັບພຣະຜູ້ມີພຣະພາກເຈົ້າ ມືອື່ນນີ້ເທີ້ນ ເຮົາຈະໂຕ້ວາທະກັບພຣະຜູ້ມີພຣະພາກເຈົ້າໃນວັງຂອງເຮົາ" ຈຶ່ງຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າມີພຣະອົງເປັນທີ່ ໔ ໂຜດຊົງຮັບພັດຕາ ຫານຂອງຂ້າພຣະອົງໃນມືອື່ນນີ້ເທີ້ນ"

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ

ລຳດັບນັ້ນ ອະໄພຣາດຊະກຸມານຊົງຮູ້ອາການທີ່ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນ ແລ້ວ ຈຶ່ງສະເດັດລຸກຈາກທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ຊົງກະທຳປະທັກ ຂິນແລ້ວ ສະເດັດຈາກໄປ

ເມື່ອຜ່ານຄືນນັ້ນໄປ ເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກຖືບາດ ແລະຈີວອນ ສະເດັດເຂົ້າໄປສູ່ວັງຂອງອະໄພຣາດຊະກຸມານ ປະທັບນັ່ງເທິງພຸດທະອາດທີ່ປູລາດ ໄວ້ແລ້ວ ຕໍ່ມາ ອະໄພຣາດຊະກຸມານຊົງອັງຄາດພຣະຜູ້ມີພຣະພາກເຈົ້າໃຫ້ອີ່ມໜຳສຸກສະບາຍ ດ້ວຍຂອງຫຍໍ້າ ຂອງຂ້ອຍອັນປະນີດດ້ວຍພຣະອົງເອງ ເມື່ອພຣະຜູ້ມີພຣະພາກເຈົ້າສະເຫວີຍ ສຳເລັດຊົງວາງພຣະຫັດແລ້ວ ອະໄພຣາດຊະກຸມານຈຶ່ງຊົງເລືອກປະທັບນັ່ງຢູ່ບ່ອນທີ່ສົມຄວນທີ່ ໃດທີ່ໜຶ່ງເຊິ່ງຕ່ຳກວ່າ

## ຄຳເວົ້າອັນບໍ່ເປັນທີ່ຮັກ

[໙໕] ອະໄພຣາດຊະກຸມານປະທັບນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ທູນຖາມພຣະຜູ້ມີພຣະ ພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຕະຖາຄົດຈະເພິ່ງຕັດວາຈາອັນບໍ່ເປັນທີ່ຮັກ ບໍ່ເປັນ ທີ່ພໍໃຈຂອງຄົນອື່ນແດ່ຫຼືບໍ່?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ຣາດຊະກຸມານ ໃນບັນຫາຂໍ້ນີ້ ຈະວິສັດຊະນາໂດຍ ສ່ວນດຽວບໍ່ໄດ້"

“ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນບັນຫາຂໍ້ນີ້ ພວກນິຄົນສູນຫາຍແລ້ວ”

“ຣາດຊະກຸມານ ເປັນຫຍັງ ພຣະອົງຈຶ່ງຕັດແນວນີ້ນໍ?”

“ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນບັນຫາຂໍ້ນີ້ ພວກນິຄົນໄດ້ສູນຫາຍແລ້ວ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ຂ້ານ້ອຍເຂົ້າໄປຫານິຄົນ ນາຕະບຸດຮອດບ່ອນຢູ່ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ນິຄົນນາຕະບຸດໄດ້ບອກວ່າ “ສະເດັດໄປເທີ້ນພຣະຣາດຊະກຸມານ ເຊີນພຣະອົງສະເດັດໄປໂຕ້ວາທະກັບພຣະສະມະນະໂຄດົມເທີ້ນ ເມື່ອພຣະອົງຊົງໂຕ້ວາທະກັບພຣະສະມະນະໂຄດົມແນວນີ້ ກິດຕິສັບອັນງາມຂອງພຣະອົງຈັກຣະບືໄປວ່າ “ອະໄພຣາດຊະກຸມານຊົງໂຕ້ວາທະກັບພຣະສະມະນະໂຄດົມຜູ້ມີລິດຫຼາຍ ມີອານຸພາບຫຼາຍແນວນີ້”

ເມື່ອນິຄົນ ນາຕະບຸດກ່າວແນວນີ້ ຂ້າພຣະອົງໄດ້ຖາມວ່າ “ທ່ານຂ້ານ້ອຍ ຂ້າພະເຈົ້າຈະໂຕ້ວາທະກັບທ່ານພຣະສະມະນະໂຄດົມຜູ້ມີລິດຫຼາຍ ມີອານຸພາບຫຼາຍແນວນີ້ ໄດ້ແນວໃດ” ນິຄົນ ນາຕະບຸດຕອບວ່າ “ມາເທີ້ນພຣະຣາດຊະກຸມານ ເຊີນພຣະອົງສະເດັດເຂົ້າໄປເຝົ້າພຣະສະມະນະໂຄດົມຮອດບ່ອນຢູ່ແລ້ວທູນຖາມແນວນີ້ວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ມີແດ່ບໍທີ່ພຣະຕະຖາຄົດ ຕັດວາຈາອັນບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນອື່ນ” ຖ້າພຣະສະມະນະໂຄດົມຖືກຖາມແນວນີ້ ແລ້ວຈະຊົງຕອບວ່າ “ຣາດຊະກຸມານ ມີບ້າງທີ່ຕະຖາຄົດກ່າວວາຈາອັນບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນອື່ນ”

ພຣະອົງເພິ່ງທູນຖາມພຣະສະມະນະໂຄດົມແນວນີ້ວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອເປັນເຊັ່ນນັ້ນ ການກະທຳຂອງພຣະອົງຈະຕ່າງອັນໃດຈາກປຸຖຸຊົນ ຍ້ອນປຸຖຸຊົນກໍກ່າວວາຈາອັນບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນອື່ນ” ຖ້າພຣະສະມະນະໂຄດົມຖືກພຣະອົງທູນຖາມແນວນີ້ແລ້ວຈະຊົງຕອບແນວນີ້ວ່າ “ຣາດຊະກຸມານ ຕະຖາຄົດບໍ່ກ່າວວາຈາອັນບໍ່ເປັນທີ່ຮັກ ບໍ່ເປັນ ທີ່ພໍໃຈຂອງຄົນອື່ນ”

ພຣະອົງເພິ່ງທູນຖາມພຣະສະມະນະໂຄດົມແນວນີ້ວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອເປັນເຊັ່ນນັ້ນ ຍ້ອນເຫດໃດ ພຣະອົງຈຶ່ງຊົງພະຍາກອນພຣະເທວະທັດວ່າ “ເທວະທັດຈັກເກີດໃນອະບາຍ ຈັກເກີດໃນນະຣົກ ດຳລົງຢູ່ສິ້ນ ໑ ກັບ ເປັນຜູ້ທີ່ໃຜ ໆ ບຳລຸງບໍ່ໄດ້” ຍ້ອນວາຈາຂອງພຣະອົງນັ້ນ ພຣະເທວະທັດໂກດເສຍໃຈ”

ພຣະຣາດຊະກຸມານ ພຣະສະມະນະໂຄດົມຖືກພຣະອົງທູນຖາມບັນຫາ ໒ ເງື່ອນນີ້ແລ້ວຈະຊົງກືນບໍ່ເຂົ້າ ຄາຍບໍ່ອອກ ກະຈັບເຫລັກຕິດຢູ່ໃນລຳຄໍຂອງບຸຣຸດ ບຸຣຸດນັ້ນ ບໍ່ອາດກືນເຂົ້າໄປໄດ້ ບໍ່ອາດຄາຍອອກ ແມ່ນສັນໃດ ພຣະສະມະນະໂຄດົມກໍສັນນັ້ນຄືກັນ ຖືກພຣະອົງທູນຖາມບັນຫາ ໒ ເງື່ອນນີ້ແລ້ວຈະຊົງກືນບໍ່ເຂົ້າ ຄາຍບໍ່ອອກ”

## ເງານໃນການຕັດວາຈາຂອງພຣະພຸດທະເຈົ້າ

[໗໖] ຂະນະນັ້ນເອງ ກຸມານນ້ອຍຍັງນອນຫງາຍຢູ່ເທິງພຣະເພົາຂອງອະໄພຣາດຊະກຸມານ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບອະໄພຣາດຊະກຸມານວ່າ "ຣາດຊະກຸມານ ພຣະອົງເຂົ້າພຣະທະໄທ ຄວາມຂໍ້ນັ້ນວ່າແນວໃດ ຖ້າກຸມານນ້ອຍນີ້ອາໄສຄວາມຜະໝາດຂອງພຣະອົງຫຼືຂອງຍິງ ອ້າຍລ້ຽງ ເພິ່ງນຳໄມ້ຫຼືກ້ອນຫີນມາໃສ່ປາກ ພຣະອົງຈະເພິ່ງປະຕິບັດກັບກຸມານນ້ອຍນັ້ນແນວໃດ?"

ອະໄພຣາດຊະກຸມານຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍຈະນຳອອກເສຍ ຖ້າຂ້ານ້ອຍບໍ່ອາດຈະນຳອອກແຕ່ທີທຳອິດໄດ້ ຂ້ານ້ອຍກໍຈະເອົາມືຊ້າຍປະຄອງຫົວແລ້ວງໍນິ້ວມືຂວາ ລ້ວງເອົາໄມ້ຫຼືກ້ອນຫີນພ້ອມດ້ວຍເລືອດອອກເສຍ ຂໍ້ນັ້ນຍ້ອນ ເຫດໃດ ຍ້ອນຂ້ານ້ອຍມີຄວາມອີດູໃນກຸມານນ້ອຍ"

"ຣາດຊະກຸມານ ຕະຖາຄົດກໍແນວນັ້ນຄືກັນ ຮູ້ວາຈາທີ່ບໍ່ຈິງ ບໍ່ແທ້ ບໍ່ປະກອບດ້ວຍປະໂຫຍດ ແລະ ວາຈານັ້ນບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນອື່ນ ຕະຖາຄົດບໍ່ກ່າວ ວາຈານັ້ນ

ອັນໜຶ່ງ ຕະຖາຄົດຮູ້ວາຈາແທ້ຈິງ ແທ້ທີ່ຈິງ ແຕ່ບໍ່ປະກອບດ້ວຍປະໂຫຍດ ແລະ ວາຈານັ້ນ ບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນອື່ນ ຕະຖາຄົດບໍ່ກ່າວວາຈານັ້ນ

ຕະຖາຄົດຮູ້ວາຈາແທ້ຈິງ ແທ້ທີ່ຈິງ ແລະ ປະກອບດ້ວຍປະໂຫຍດ ແຕ່ວາຈານັ້ນບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງຄົນອື່ນ ໃນຂໍ້ນັ້ນ ຕະຖາຄົດຮູ້ການທີ່ຈະກ່າວວາຈານັ້ນ

ຕະຖາຄົດຮູ້ວາຈາທີ່ບໍ່ຈິງ ບໍ່ແທ້ ບໍ່ປະກອບດ້ວຍປະໂຫຍດ ແຕ່ວາຈານັ້ນເປັນທີ່ຮັກ ເປັນທີ່ພໍໃຈຂອງຄົນອື່ນ ຕະຖາຄົດບໍ່ກ່າວວາຈານັ້ນ

ຕະຖາຄົດຮູ້ວາຈາແທ້ຈິງ ແທ້ທີ່ຈິງ ບໍ່ປະກອບດ້ວຍປະໂຫຍດ ແຕ່ວາຈານັ້ນເປັນທີ່ຮັກ ເປັນທີ່ພໍໃຈຂອງຄົນອື່ນ ຕະຖາຄົດບໍ່ກ່າວວາຈານັ້ນ

ອັນໜຶ່ງ ຕະຖາຄົດຮູ້ວາຈາແທ້ຈິງ ແທ້ທີ່ຈິງ ທີ່ປະກອບດ້ວຍປະໂຫຍດ ແລະວາຈານັ້ນເປັນທີ່ຮັກ ເປັນທີ່ພໍໃຈຂອງຄົນອື່ນ ໃນຂໍ້ນັ້ນ ຕະຖາຄົດຮູ້ການທີ່ຈະກ່າວວາຈານັ້ນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຕະຖາຄົດມີຄວາມອີດູໃນໝູ່ສັດທັງຫລາຍ"

## ພຸດທະປະຕິພານ

[໗໗] "ຂ້າແດ່ ພຣະອົງຜູ້ຈະເລີນ ກະສັດຜູ້ເປັນບັນດິດກໍດີ ພາມຜູ້ເປັນ ບັນດິດກໍດີ ຄະ

ຫະບໍດີຜູ້ເປັນບັນດິດກໍດີ ສະມະນະຜູ້ເປັນບັນດິດກໍດີ ຕັ້ງບັນຫາແລ້ວເຂົ້າມາເຝົ້າພຣະຕະຖາຄົດ ທູນຖາມບັນຫານັ້ນ ການຕອບບັນຫາຂອງບັນດິດເຫຼົ່ານັ້ນ ພຣະຜູ້ມີພຣະພາກເຈົ້າຊົງນຶກດ້ວຍພຣະຫະທັຍກ່ອນວ່າ "ບັນດິດທັງຫລາຍຈັກເຂົ້າມາຫາເຮົາແລ້ວທູນຖາມບັນຫາແນວນີ້ ເຮົາເມື່ອບັນດິດເຫຼົ່ານັ້ນທູນຖາມແນວນີ້ແລ້ວ ຈັກຕອບແນວນີ້" ຫຼື ວ່າຄຳຕອບນັ້ນຜາກົດແກ່ພຣະຕະຖາຄົດໂດຍທັນທີ"

"ຣາດຊະກຸມານ ຖ້າເຊັ່ນນັ້ນ ໃນຂໍ້ນີ້ ຕະຖາຄົດຈັກຖາມພຣະອົງແດ່ ຂໍ້ນີ້ພຣະອົງເຫັນຄວນແນວໃດ ພຣະອົງເພິ່ງຕອບແນວນັ້ນ ພຣະອົງຊົງເຂົ້າພຣະຫະໄທຄວາມຂໍ້ນັ້ນ ວ່າແນວໃດພຣະອົງເປັນຜູ້ຊ່ຽວຊານໃນອົງປະກອບນ້ອຍໃຫຍ່ຂອງລົດ ບໍ່ແມ່ນບໍ?"

"ແມ່ນ ຂ້ານ້ອຍ ຂ້ານ້ອຍເປັນຜູ້ຊ່ຽວຊານໃນອົງປະກອບນ້ອຍໃຫຍ່ຂອງລົດ"

"ຣາດຊະກຸມານ ພຣະອົງຊົງເຂົ້າພຣະຫະໄທຄວາມຂໍ້ນັ້ນວ່າແນວໃດ ຊົນທັງຫລາຍເຂົ້າໄປເຝົ້າພຣະອົງແລ້ວທູນຖາມແນວນີ້ວ່າ "ອົງປະກອບນ້ອຍໃຫຍ່ຂອງລົດຄັນນີ້ຊື່ອັນໃດ" ການຕອບບັນຫາຂອງຊົນເຫຼົ່ານັ້ນ ພຣະອົງນຶກດ້ວຍພຣະຫະໄທກ່ອນວ່າ "ຊົນທັງຫລາຍເຂົ້າມາຫາເຮົາແລ້ວຈັກຖາມແນວນີ້ ເຮົາເມື່ອຖືກຊົນເຫຼົ່ານັ້ນຖາມແນວນີ້ ຈັກຕອບແນວນີ້" ຫຼື ວ່າຄຳຕອບນັ້ນຜາກົດແກ່ພຣະອົງໂດຍທັນທີ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນຂ້ານ້ອຍເປັນຜູ້ຊ່ຽວຊານຮູ້ຈັກລົດເປັນຢ່າງດີ ຊ່ຽວຊານໃນອົງປະກອບນ້ອຍໃຫຍ່ຂອງລົດ ອົງປະກອບນ້ອຍໃຫຍ່ຂອງລົດທັງໝົດ ຂ້ານ້ອຍຮູ້ດີແລ້ວສັນນັ້ນ ການຕອບບັນຫານັ້ນຜາກົດແກ່ຂ້ານ້ອຍໂດຍທັນທີ"

"ຣາດຊະກຸມານ ກະສັດຜູ້ເປັນບັນດິດກໍດີ ພາມຜູ້ເປັນບັນດິດກໍດີ ຄະຫະບໍດີ ຜູ້ເປັນບັນດິດກໍດີ ສະມະນະຜູ້ເປັນບັນດິດກໍດີ ຕັ້ງບັນຫາແລ້ວຈັກເຂົ້າມາຫາຕະຖາຄົດ ຖາມບັນຫານັ້ນ ການຕອບບັນຫານັ້ນຜາກົດແກ່ຕະຖາຄົດໂດຍທັນທີຄືກັນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນທຳມະທາດນັ້ນ ຕະຖາຄົດແທງຕະຫຼອດດີແລ້ວ ການຕອບບັນຫານັ້ນຜາກົດແກ່ຕະຖາຄົດໂດຍທັນທີ"

## ອະໄພຣາດຊະກຸມານສະແດງຕົນເປັນອຸປາສົກ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ອະໄພຣາດຊະກຸມານໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫລົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າ

ພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" ດັ່ງນີ້ແລ

**ອະພະຍະຣາຊະກຸມາຣະສູດທີ່ ๗ ຈົບ**

# ໘. ພະຫຸເວທະນີຍະສູດ

## ວ່າດ້ວຍເວທະນາຫຼາຍປະເພດ

[໗໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ຊ່າງໄມ້ຊື່ປັນຈະກັງຄະເຂົ້າໄປຫາທ່ານພຣະອຸທາຍີຮອດບ່ອນຢູ່ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານພຣະອຸທາຍີວ່າ "ທ່ານອຸທາຍີ ພຣະຜູ້ມີພຣະພາກເຈົ້າຕັດເວທະນາໄວ້ທໍ່ໃດ ຂ້ານ້ອຍ"

ທ່ານພຣະອຸທາຍີຕອບວ່າ "ຊ່າງໄມ້ ພຣະຜູ້ມີພຣະພາກເຈົ້າຕັດເວທະນາໄວ້ ໓ ປະການ ຄື (໑) ສຸກຂະເວທະນາ (໒) ທຸກຂະເວທະນາ (໓) ອະທຸກຂະມະສຸກຂະເວທະນາ ພຣະຜູ້ມີພຣະພາກເຈົ້າຕັດ ເວທະນາໄວ້ ໓ ປະການນີ້"

ເມື່ອທ່ານພຣະອຸທາຍີກ່າວແນວນີ້ແລ້ວ ຊ່າງໄມ້ຊື່ປັນຈະກັງຄະໄດ້ກ່າວກັບທ່ານ ພຣະອຸທາຍີວ່າ "ທ່ານອຸທາຍີ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດເວທະນາໄວ້ ໓ ປະການ ແຕ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ໒ ປະການ ຄື (໑) ສຸກຂະເວທະນາ (໒) ທຸກຂະເວທະນາ

ທ່ານຜູ້ຈະເລີນ ອະທຸກຂະມະສຸກຂະເວທະນາ ພຣະຜູ້ມີພຣະພາກເຈົ້າຕັດໄວ້ໃນສຸກທີ່ສະງົບປະນີດ"

ແມ່ນເທື່ອທີ ໒ ທ່ານພຣະອຸທາຍີກໍໄດ້ກ່າວກັບຊ່າງໄມ້ຊື່ປັນຈະກັງຄະວ່າ "ຊ່າງໄມ້ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດເວທະນາໄວ້ ໒ ປະການ ແຕ່ພຣະຜູ້ມີພຣະພາກເຈົ້າຕັດເວທະນາໄວ້ ໓ ປະການ ຄື (໑) ສຸກຂະເວທະນາ (໒) ທຸກຂະເວທະນາ (໓) ອະທຸກຂະມະສຸກຂະເວທະນາ

ພຣະຜູ້ມີພຣະພາກເຈົ້າຕັດເວທະນາໄວ້ ໓ ປະການນີ້"

ແມ່ນເທື່ອທີ ໒ ຊ່າງໄມ້ຊື່ປັນຈະກັງຄະກໍໄດ້ກ່າວກັບທ່ານພຣະອຸທາຍີວ່າ "ທ່ານອຸທາຍີ

ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດເວທະນາໄວ້ ໓ ປະການ ແຕ່ພຣະຜູ້ມີພຣະພາກເຈົ້າຕັດເວທະນາໄວ້ ໒ ປະການ ຄື (໑) ສຸກຂະເວທະນາ (໒) ທຸກຂະເວທະນາ

ທ່ານຜູ້ຈະເລີນ ອະທຸກຂະມະສຸກຂະເວທະນາ ພຣະຜູ້ມີພຣະພາກເຈົ້າຕັດໄວ້ໃນສຸກທີ່ສະງົບປະນີດ"

ແມ່ນເທື່ອທີ ໓ ທ່ານພຣະອຸທາຍີກໍໄດ້ກ່າວກັບຊ່າງໄມ້ຊື່ປັນຈະກັງຄະວ່າ "ຊ່າງໄມ້ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດເວທະນາໄວ້ ໒ ປະການ ແຕ່ພຣະຜູ້ມີພຣະພາກເຈົ້າຕັດເວທະນາໄວ້ ໓ ປະການ ຄື (໑) ສຸກຂະເວທະນາ (໒) ທຸກຂະເວທະນາ (໓) ອະທຸກຂະມະສຸກຂະເວທະນາ

ພຣະຜູ້ມີພຣະພາກເຈົ້າຕັດເວທະນາໄວ້ ໓ ປະການນີ້"

ແມ່ນເທື່ອທີ ໓ ຊ່າງໄມ້ຊື່ປັນຈະກັງຄະກໍໄດ້ກ່າວກັບທ່ານພຣະອຸທາຍີວ່າ "ທ່ານອຸທາຍີ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດເວທະນາໄວ້ ໓ ປະການ ແຕ່ພຣະຜູ້ມີພຣະພາກເຈົ້າຕັດເວທະນາໄວ້ ພຽງ ໒ ປະການ ຄື (໑) ສຸກຂະເວທະນາ (໒) ທຸກຂະເວທະນາ

ທ່ານຜູ້ຈະເລີນ ອະທຸກຂະມະສຸກຂະເວທະນາພຣະຜູ້ມີພຣະພາກເຈົ້າຕັດໄວ້ໃນສຸກທີ່ສະງົບປະນີດ"

ທ່ານພຣະອຸທາຍີບໍ່ສາມາດໃຫ້ຊ່າງໄມ້ຊື່ປັນຈະກັງຄະຍິນຍອມໄດ້ ຊ່າງໄມ້ຊື່ປັນຈະກັງຄະກໍບໍ່ສາມາດໃຫ້ທ່ານພຣະອຸທາຍີຍິນຍອມໄດ້

[໘໙] ທ່ານພຣະອານົນໄດ້ຍິນການສົນທະນາປາໄສນີ້ຂອງທ່ານພຣະອຸທາຍີກັບ ຊ່າງໄມ້ຊື່ປັນຈະກັງຄະ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນເຖິງການສົນທະນາປາໄສຂອງທ່ານພຣະອຸທາຍີກັບຊ່າງໄມ້ຊື່ປັນຈະກັງຄະທັງໝົດນັ້ນແດ່ພຣະຜູ້ມີພຣະພາກເຈົ້າ ເມື່ອທ່ານພຣະອານົນຂາບທູນແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານພຣະອານົນ ວ່າ

"ອານົນ ຊ່າງໄມ້ຊື່ປັນຈະກັງຄະບໍ່ຄວນຕາມບັນລະຍາຍທີ່ມີຢູ່ຂອງອຸທາຍີ ສ່ວນອຸທາຍີກໍບໍ່ຄວນຕາມບັນລະຍາຍທີ່ມີຢູ່ຂອງຊ່າງໄມ້ຊື່ປັນຈະກັງຄະ

## ປະເພດແຫ່ງເວທະນາ

ອານົນ ເຮົາກ່າວເວທະນາ ໒ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໓ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໕ ປະການໄວ້ໂດຍບັນລະຍາຍກໍມີ ກ່າວ ເວທະນາ ໖ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໑໘ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວ

ທະນາ ໓໖ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໑໐໘ ປະການໄວ້ໂດຍ ບັນລະຍາຍກໍມີ

ທຳອັນເຮົາສະແດງໄວ້ແລ້ວໂດຍບັນລະຍາຍແບບນີ້ ເມື່ອທຳອັນເຮົາສະແດງໄວ້ແລ້ວໂດຍບັນລະຍາຍແບບນີ້ ຊົນເຫຼົ່າໃດຈັກບໍ່ຮູ້ ບໍ່ສຳຄັນ ບໍ່ຊົມຊື່ນຕາມຄຳທີ່ເຮົາກ່າວເຈລະຈາດີແລ້ວແກ່ກັນແລະກັນ ຊົນເຫຼົ່ານັ້ນເພິ່ງຫວັງໄດ້ວ່າ ຈັກບາດໝາງກັນ ຜິດຖຽງກັນ ໃຊ້ຫອກຄືປາກທີ່ມແທງກັນຢູ່

ທຳອັນເຮົາສະແດງໄວ້ແລ້ວໂດຍບັນລະຍາຍແບບນີ້ ເມື່ອທຳອັນເຮົາສະແດງໄວ້ແລ້ວໂດຍບັນລະຍາຍແບບນີ້ ຊົນເຫຼົ່າໃດຈັກຮູ້ ສຳຄັນ ຊົມຊື່ນຕາມຄຳທີ່ເຮົາກ່າວເຈລະຈາດີແລ້ວ ແກ່ກັນແລະກັນ ຊົນເຫຼົ່ານັ້ນເພິ່ງຫວັງໄດ້ວ່າ ຈັກພ້ອມພຽງກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ເປັນຄືນ້ຳນົມກັບນ້ຳ ແນມເບິ່ງກັນດ້ວຍໜ່ວຍຕາທີ່ປ່ຽມດ້ວຍຄວາມຮັກຢູ່

## ກາມສຸກ

[໗໐] ອານົນ ກາມມະຄຸນ ໕ ປະການນີ້

ກາມມະຄຸນ ໕ ປະການ ອັນໃດແດ່ ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ
໒. ສຽງທີ່ຈະຮູ້ແຈ້ງທາງຫູ ฯລฯ
໓. ກິ່ນທີ່ຈະຮູ້ແຈ້ງທາງດັງ ฯລฯ
໔. ຣົດທີ່ຈະຮູ້ແຈ້ງທາງລີ້ນ ฯລฯ
໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ກາມມະຄຸນ ໕ ປະການນີ້

ສຸກໂສມະນັດທີ່ເກີດຂຶ້ນຍ້ອນອາໄສກາມມະຄຸນ ໕ ປະການນີ້ ເຮົາຮຽກວ່າ ກາມສຸກ

ຊົນໃດເພິ່ງກ່າວແບບນີ້ວ່າ "ຊົນທັງຫລາຍຍ່ອມສະເຫວີຍສຸກໂສມະນັດທີ່ສະງົບຢ່າງຍິ່ງນີ້" ເຮົາກໍບໍ່ຄວນຕາມຄຳຂອງຊົນນັ້ນ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຍັງມີສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້

ສຸກອື່ນທີ່ດີກວ່າແລະປະນີດກວ່າ

ສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສະຫງັດຈາກກາມແລະອະກຸສົນທຳທັງຫລາຍແລ້ວ ບັນລຸປະຖົມຊານ ທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່

ນີ້ແລ ຊື່ວ່າສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້

ຊົນໃດເພິ່ງກ່າວແນວນີ້ວ່າ "ຊົນທັງຫລາຍຍ່ອມສະເຫວີຍສຸກໂສມະນັດທີ່ສະງົບຢ່າງຍິ່ງນີ້" ເຮົາກໍ ບໍ່ຄວນຕາມຄຳຂອງຊົນນັ້ນ

ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນຍັງມີສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້

ສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້ ເປັນແນວໃດ?

ຄື ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸໃນທຳວິໄນນີ້ບັນລຸທຸຕິຍະຊານ ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກ ອັນເກີດຈາກສະມາທິຢູ່ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານ ຯລຯ ຢູ່

ນີ້ແລ ຊື່ວ່າສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້

ຊົນໃດເພິ່ງກ່າວແນວນີ້ວ່າ ຯລຯ

ສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດ ນານັດຕະສັນຍາໂດຍປະການທັງປວງ ບັນລຸອາກາສານັນຈາຍະຕະນະຊານຢູ່ໂດຍກຳນົດວ່າ "ອາກາດຫາບ່ອນສຸດບໍ່ໄດ້"

ນີ້ແລ ຊື່ວ່າ ສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້

ຊົນໃດເພິ່ງກ່າວແນວນີ້ວ່າ ຯລຯ

ສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ້ອນລ່ວງຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານຢູ່ ໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້"

ນີ້ແລ ຊື່ວ່າສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້

ຊົນໃດເພິ່ງກ່າວແນວນີ້ວ່າ ຯລຯ

ສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ້ອນລ່ວງຊານໄດ້ໂດຍປະການທັງປວງ ບັນລຸອາກິນຈັນຍາ-ຍະຕະນະຊານຢູ່ ໂດຍກຳນົດວ່າ "ບໍ່ມີອັນໃດ"

ນີ້ແລ ຊື່ວ່າສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້

ຊົນໃດເພິ່ງກ່າວແນວນີ້ວ່າ ฯລฯ

ສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ້ອນລ່ວງຊານໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່

ນີ້ແລ ຊື່ວ່າສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້

ອານົນ ຊົນໃດເພິ່ງກ່າວແນວນີ້ວ່າ "ຊົນທັງຫລາຍຍ່ອມສະເຫວີຍສຸກໂສມະນັດທີ່ສະງົບຢ່າງຍິ່ງນີ້" ເຮົາກໍບໍ່ໄດ້ຄ້ອນຕາມຄຳຂອງຊົນນັ້ນ

ຂໍ້ນັ້ນຍ້ອນເຫດໃດ

ຍ້ອນຍັງມີສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້

ສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ້ອນລ່ວງຊານໄດ້ໂດຍປະການທັງປວງ ບັນລຸສັນຍາ-ເວທະຍິຕນິໂຣດຢູ່

ນີ້ແລ ຊື່ວ່າສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້

[໙໑] ອານົນ ເປັນໄປໄດ້ທີ່ອັນຍະເດຍຣະຖີປະຣິພາຊົກທັງຫລາຍ ຈະເພິ່ງກ່າວແນວນີ້ວ່າ "ເປັນໄປໄດ້ ຫຼື ເປັນໄປໄດ້ແນວໃດທີ່ພຣະສະມະນະໂຄດົມກ່າວສັນຍາເວທະຍິດນິໂຣດ ແລະບັນຍັດສັນຍາເວທະຍິຕນິໂຣດນັ້ນໄວ້ໃນສຸກ"

ອານົນ ອັນຍະເດຍຣະຖີປະຣິພາຊົກທັງຫລາຍຜູ້ກ່າວແນວນີ້ ທ່ານທັງຫລາຍເພິ່ງຄ້ານວ່າ "ທ່ານທັງຫລາຍ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຊົງໝາຍເຖິງສຸກຂະເວທະນາພຽງແນວດຽວແລ້ວບັນຍັດສັນຍາເວທະຍິຕນິໂຣດນັ້ນໄວ້ໃນສຸກເລີຍ ແຕ່ບຸກຄົນຍ່ອມປະສົບສຸກໃນຖານະໃດ ໆ ມີສຸກໃນຖານະໃດ ໆ ພຣະຕະຖາຄົດຈຶ່ງຊົງບັນຍັດຖານະນັ້ນ ໆ ໄວ້ໃນສຸກ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະອານົນມີໃຈຍິນດີຊົມຊື່ນພຣະພາສິດ ຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ພະຫຸເວທະນິຍະສູດທີ ໙ ຈົບ**

# ໑໐. ອະປັນນະກະສູດ

## ວ່າດ້ວຍການປະຕິບັດບໍ່ຜິດ

## ພຣະພຸດທະເຈົ້າສະເດັດໂຜດຊາວບ້ານສາລາ

[໗໔] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມກັບພິກຂຸສົງໝູ່ໃຫຍ່ ສະເດັດເຖິງເຮືອນພາມຂອງຊາວໂກສົນຊື່ສາລາ ພາມແລະຄະຫະບໍດີຊາວບ້ານ ສາລາໄດ້ສະດັບຂ່າວ ວ່າ

"ທ່ານຜູ້ຈະເລີນທັງຫລາຍ ໄດ້ຂ່າວວ່າ ທ່ານພຣະສະມະນະໂຄດົມເປັນສາກະຍະບຸດສະເດັດ ອອກບວດຈາກສາກະຍະຕະກູນ ສະເດັດຈາຣິກຢູ່ໃນແຄວ້ນໂກສົນ ພ້ອມກັບພິກຂຸສົງໝູ່ໃຫຍ່ສະເດັດເຖິງເຮືອນພາມຊື່ສາລາໂດຍລຳດັບ ທ່ານພຣະໂຄດົມນັ້ນມີກິດຕິສັບ ອັນງາມຂ່າລືໄປແບບນີ້ວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະໃນສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີຝຶກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫລາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ພຣະອົງຊົງຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດດ້ວຍພຣະອົງເອງແລ້ວ ຊົງປະກາດໃຫ້ຜູ້ອື່ນຮູ້ຕາມ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ຊົງປະກາດ ພົມມະຈັນພ້ອມທັງອັດຖະແລະພະຍັນຊະນະບໍລິສຸດ ບໍລິບູນຄົບຖ້ວນ ການໄດ້ພົບ ພຣະອະຣະຫັນທັງຫລາຍແບບນີ້ເປັນຄວາມດີຢ່າງແທ້ຈິງ"

ຄັ້ງນັ້ນ ພາມແລະຄະຫະບໍດີຊາວບ້ານສາລາເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ລາງພວກຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກທູນສົນທະນາປາໄສ ພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກປະນົມມື ໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບນັ່ງແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກປະກາດຊື່ແລະໂຄດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກກໍນັ່ງນິ່ງຢູ່ທີ່ທີ່ສົມຄວນ

## ຕັດອະປັນນະກະທຳ

[໙໓] ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພາມ ແລະ ຄະຫະບໍດີຊາວບ້ານສາລາຜູ້ນັ່ງຮຽບຮ້ອຍແລ້ວ ວ່າ

"ພາມແລະຄະຫະບໍດີທັງຫລາຍ ສາດສະດາອົງໃດອົງໜຶ່ງເຊິ່ງເປັນທີ່ພໍໃຈຂອງທ່ານທັງຫລາຍ ເປັນເຫດໃຫ້ໄດ້ສັດທາທີ່ມີເຫດຜົນມີຢູ່ບໍ?"

ພາມແລະຄະຫະບໍດີເຫຼົ່ານັ້ນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ສາດສະດາ ອົງໃດອົງໜຶ່ງ ເຊິ່ງເປັນທີ່ພໍໃຈຂອງຂ້າພຣະອົງທັງຫລາຍ ເປັນເຫດໃຫ້ໄດ້ສັດທາທີ່ມີເຫດຜົນ ຍັງບໍ່ມີເລີຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມແລະຄະຫະບໍດີທັງຫລາຍ ເມື່ອທ່ານທັງຫລາຍ ຍັງບໍ່ໄດ້ສາດສະດາເປັນທີ່ພໍໃຈ ເພິ່ງສະມາທານອະປັນນະກະທຳ໑ນີ້ແລ້ວປະພຶດຕາມເທີ້ນ ຍ້ອນວ່າອະປັນນະກະທຳທີ່ທ່ານທັງຫລາຍສະມາທານໃຫ້ບໍລິບູນ ຈັກເປັນໄປເພື່ອປະໂຫຍດ ເກື້ອກູນເພື່ອສຸກແກ່ທ່ານທັງຫລາຍຕະຫຼອດການລະນານ

ອະປັນນະກະທຳນັ້ນ ເປັນແນວໃດ?

## ນັດຖິກະທິດຖິກັບອັດຖິກະທິດຖິ

[໙໔] ຄື ມີສະມະນະພາມພວກຫນຶ່ງຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການເຊັ່ນສຣວງກໍບໍ່ມີຜົນ ຜົນວິບາກ ແຫ່ງກຳທີ່ເຮັດດີເຮັດຊົ່ວກໍບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ໂອປະປາຕິກະສັດກໍບໍ່ມີ ສະມະນະພາມຜູ້ປະພຶດປະຕິບັດຊອບ ເຮັດໃຫ້ແຈ້ງໂລກນີ້ ແລະ ໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງ ກໍບໍ່ມີໃນໂລກ"

ສະມະນະພາມອີກພວກຫນຶ່ງ ມີວາທະເປັນຂ້າເສິກໂດຍກົງຕໍ່ສະມະນະພາມເຫຼົ່ານັ້ນ ພວກເຂົາກ່າວແນວນີ້ວ່າ "ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາແລ້ວມີຜົນ ການເຊັ່ນສຣວງກໍມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີເຮັດຊົ່ວມີ ໂລກນີ້ມີ ໂລກໜ້າມີ ມານດາມີຄຸນ ບິດາມີຄຸນ ໂອປະປາຕິກະສັດມີຢູ່ ສະມະນະພາມຜູ້ປະພຶດປະຕິບັດຊອບ ເຮັດໃຫ້ແຈ້ງໂລກນີ້ແລະ ໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງ ກໍມີຢູ່ໃນໂລກ"

ພາມແລະຄະຫະບໍດີທັງຫລາຍ ທ່ານທັງຫລາຍເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ສະມະນະພາມເຫລົ່ານີ້ມີວາທະຂັດແຍ້ງກັນໂດຍກົງ ບໍ່ແມ່ນບໍ?"

ພາມແລະຄະຫະບໍດີເຫຼົ່ານັ້ນຂາບທູນວ່າ "ແມ່ນ ຂ້ານ້ອຍ"

## ໂທດແຫ່ງການປະຕິບັດຜິດ

[໗໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມແລະຄະຫະບໍດີທັງຫລາຍ ບັນດາສະມະນະພາມ ໔ ຈຳພວກນັ້ນ ສະມະນະພາມເຫຼົ່າໃດ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການເຊ່ນສຣວງກໍບໍ່ມີຜົນ ຯລຯ ສະມະນະພາມ ຜູ້ປະພຶດປະຕິບັດຊອບ ເຮັດໃຫ້ແຈ້ງໂລກນີ້ ແລະ ໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນໃຫ້ຜູ້ອື່ນຮູ້ແຈ້ງກໍບໍ່ມີໃນໂລກ" ສະມະນະພາມເຫຼົ່ານັ້ນ ເພິ່ງຫວັງຂໍ້ນີ້ໄດ້ ຄື ຈັກເວັ້ນກຸສົນທຳ ໓ ປະການນີ້ ໄດ້ແກ່ (໑) ກາຍສຸດຈະຣິດ (໒) ວະຈີສຸຈະຣິດ (໓) ມະໂນສຸດຈະຣິດ ຈັກສະມາທານອະກຸສົນທຳ ໓ ປະການນີ້ ໄດ້ແກ່ (໑) ກາຍທຸດຈະຣິດ (໒) ວະຈີທຸດຈະຣິດ (໓) ມະໂນທຸດຈະຣິດແລ້ວປະພຶດຢູ່

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນສະມະນະພາມເຫຼົ່ານັ້ນ ບໍ່ເຫັນໂທດ ຄວາມຕ່ຳຊາມ ຄວາມເສົ້າໝອງແຫ່ງອະກຸສົນທຳ ບໍ່ເຫັນອານິສົງໃນເນກຂຳມະອັນເປັນຝ່າຍຜ່ອງແຜ້ວແຫ່ງກຸສົນທຳ

ອັນໜຶ່ງ ໂລກໜ້າມີ ແຕ່ເຂົາກັບເຫັນວ່າ "ໂລກໜ້າບໍ່ມີ" ຄວາມເຫັນນັ້ນຂອງເຂົາຈຶ່ງເປັນມິດສາທິດຖິ ໂລກໜ້າມີ ແຕ່ເຂົາດຳຣິວ່າ "ໂລກໜ້າບໍ່ມີ" ຄວາມດຳຣິນັ້ນຂອງເຂົາຈຶ່ງເປັນມິດສາສັງກັບປະ ໂລກໜ້າມີ ແຕ່ເຂົາກ່າວວ່າ "ໂລກໜ້າບໍ່ມີ" ວາຈານັ້ນຂອງເຂົາຈຶ່ງເປັນ ມິດສາວາຈາ ໂລກໜ້າມີ ເຂົາກ່າວວ່າ "ໂລກໜ້າບໍ່ມີ" ຜູ້ນີ້ຍ່ອມເຮັດຕົນເປັນຂ້າເສິກຕໍ່ ພຣະອະຣະຫັນຜູ້ຮູ້ແຈ້ງໂລກໜ້າ ໂລກໜ້າມີ ເຂົາເຮັດໃຫ້ຜູ້ອື່ນເຂົ້າໃຈວ່າ "ໂລກໜ້າບໍ່ມີ" ການທີ່ເຂົາເຮັດໃຫ້ຜູ້ອື່ນເຂົ້າໃຈເຊັ່ນນັ້ນ ເປັນການເຮັດໃຫ້ເຂົ້າໃຈຜິດຈາກຄວາມເປັນຈິງ ແລະເຂົາຍັງຈະຍົກຕົນຂົ່ມຜູ້ອື່ນດ້ວຍການເຮັດໃຫ້ເຂົ້າໃຈຜິດຈາກຄວາມເປັນຈິງນັ້ນ ໂດຍໄນນີ້ ເລີ່ມຕົ້ນເຂົາກໍລະຖິ້ມຄວາມເປັນຜູ້ມີສິນດີງາມແລ້ວຕັ້ງຕົນເປັນຄົນທຸສິນ ຍ້ອນມິດສາທິດຖິເປັນປັດໄຈ ບາບອະກຸສົນທຳເປັນອະເນກເຫລົ່ານີ້ ຄື ມິດສາທິດຖິ ມິດສາສັງກັບປະ ມິດສາວາຈາ ຄວາມເປັນຂ້າເສິກກັບພຣະອະຣິຍະການເຮັດໃຫ້ຜູ້ອື່ນເຂົ້າໃຈຜິດຈາກຄວາມເປັນຈິງ ການຍົກຕົນ ການຂົ່ມຜູ້ອື່ນ ຍ່ອມເກີດຂຶ້ນດ້ວຍປະການແນວນີ້

ພາມ ແລະຄະຫະບໍດີທັງຫລາຍ ໃນລັດທິຂອງສະມະນະພາມເຫຼົ່ານັ້ນ ວິນຍູຊົນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ "ຖ້າໂລກໜ້າບໍ່ມີ ເມື່ອເປັນແນວນີ້ ບຸຣຸດບຸກຄົນນີ້ຫລັງຈາກຕາຍແລ້ວຈັກເຮັດຕົນໃຫ້ມີຄວາມໂດຍປອດໄພໄດ້ ຖ້າໂລກໜ້າມີຈິງ ເມື່ອເປັນແນວນີ້ ບຸຣຸດບຸກຄົນນີ້ຫລັງຈາກຕາຍແລ້ວ ຈັກໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກຖ້າໂລກໜ້າບໍ່ມີຈິງ ຄຳຂອງສະມະນະພາມເຫຼົ່ານັ້ນ ຈະຈິງຫຼືບໍ່ກໍຊ່າງເທີ້ນ ເມື່ອເປັນເຊັ່ນນັ້ນ ບຸຣຸດບຸກຄົນນີ້ຍ່ອມ ຖືກວິນຍູ

ຊົນ ຕິຕຽນໄດ້ໃນປັດຈຸບັນວ່າ "ເປັນບຸຣຸດບຸກຄົນຜູ້ທຸສີນ ເປັນມິດສາທິດຖິ ເປັນນັດຖິກະວາທະ"

ຖ້າໂລກໜ້າມີຈິງ ບຸຣຸດບຸກຄົນນີ້ຈະໄດ້ຮັບໂທດໃນໂລກທັງ ໒ ຄື (໑) ໃນປັດຈຸບັນຖືກວິນຍູຊົນຕິຕຽນໄດ້ (໒) ຫລັງຈາກຕາຍແລ້ວຈັກໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກແນວນີ້

ອະປັນນະກະທຳນີ້ ທີ່ບຸກຄົນນັ້ນສະມາທານໃຫ້ບໍລິບູນບໍ່ດີ ແຜ່ດິ່ງໄປຝ່າຍດຽວ ຍ່ອມລະເຫດທີ່ເປັນກຸສົນ ດ້ວຍປະການແນວນີ້

## ຄຸນແຫ່ງການປະຕິບັດຖືກຕ້ອງ

[໙໙] ພາມ ແລະຄະຫະບໍດີທັງຫລາຍ ບັນດາສະມະນະພາມ ໒ ຈຳພວກນັ້ນ ສະມະນະພາມເຫຼົ່າໃດຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ທານທີ່ໃຫ້ແລ້ວມີຜົນ ຯລຯ ສະມະນະພາມຜູ້ປະພຶດປະຕິບັດຊອບ ເຮັດໃຫ້ແຈ້ງໂລກນີ້ ແລະ ໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນໃຫ້ຜູ້ອື່ນຮູ້ແຈ້ງ ມີຢູ່ໃນໂລກ" ສະມະນະພາມເຫຼົ່ານັ້ນເພິ່ງຫວັງຂໍ້ນີ້ໄດ້ ຄື ຈັກເວັ້ນອະກຸສົນທຳ ໓ ປະການນີ້ ໄດ້ແກ່ (໑) ກາຍທຸດຈະຣິດ (໒) ວະຈີທຸດຈະຣິດ (໓) ມະໂນທຸດຈະຣິດ ຈັກສະມາທານກຸສົນທຳ ໓ ປະການນີ້ ໄດ້ແກ່ (໑) ກາຍສຸດຈະຣິດ (໒) ວະຈີສຸຈະຣິດ (໓) ມະໂນສຸດຈະຣິດແລ້ວປະພຶດຢູ່

ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນສະມະນະພາມເຫຼົ່ານັ້ນ ເຫັນໂທດ ຄວາມຕ່ຳຊາມ ຄວາມເສົ້າໝອງແຫ່ງອະກຸສົນທຳ ເຫັນອານິສົງໃນເນກຂຳມະອັນເປັນຝ່າຍຜ່ອງແຜ້ວແຫ່ງກຸສົນທຳ

ອັນໜຶ່ງ ໂລກໜ້າມີ ເຂົາເຫັນວ່າ "ໂລກໜ້າມີຈິງ" ຄວາມເຫັນນັ້ນຂອງເຂົາ ຈຶ່ງເປັນສຳມາທິດຖິ ໂລກໜ້າມີຈິງ ເຂົາດຳຣິວ່າ "ໂລກໜ້າມີຈິງ" ຄວາມດຳຣິນັ້ນຂອງເຂົາຈຶ່ງເປັນສຳມາສັງກັບປະ ໂລກໜ້າມີຈິງ ເຂົາກ່າວວ່າ "ໂລກໜ້າມີຈິງ" ວາຈານັ້ນຂອງເຂົາຈຶ່ງເປັນສຳມາວາຈາ ໂລກໜ້າມີຈິງ ເຂົາກ່າວວ່າ "ໂລກໜ້າມີຈິງ" ຜູ້ນີ້ຊື່ວ່າບໍ່ເຮັດຕົນເປັນຂ້າເສິກກັບພຣະອະຣະຫັນຜູ້ຮູ້ແຈ້ງໂລກໜ້າ ໂລກໜ້າມີ ເຂົາເຮັດໃຫ້ຜູ້ອື່ນເຂົ້າໃຈວ່າ "ໂລກໜ້າມີຈິງ" ການທີ່ເຂົາເຮັດໃຫ້ຜູ້ອື່ນເຂົ້າໃຈເຊັ່ນນັ້ນ ເປັນການເຮັດໃຫ້ເຂົ້າໃຈຖືກຕາມຄວາມເປັນຈິງ ແລະ ເຂົາຍ່ອມບໍ່ຍົກຕົນຂົ່ມຜູ້ອື່ນ ດ້ວຍການເຮັດໃຫ້ເຂົ້າໃຈຖືກຕາມຄວາມເປັນຈິງນັ້ນ ໂດຍໄນນີ້ ເລີ່ມຕົ້ນເຂົາກໍລະຖິ້ມຄວາມເປັນຜູ້ທຸສີນ ແລ້ວຕັ້ງຕົນເປັນຄົນມີສີນດີງາມ ຍ້ອນສຳມາທິດຖິເປັນປັດໄຈ ກຸສົນທຳເປັນອະເນກເຫລົ່ານີ້ ຄື ສຳມາທິດຖິ ສຳມາສັງກັບປະ ສຳມາວາຈາ ຄວາມບໍ່ເປັນຂ້າເສິກກັບພຣະອະຣິຍະ ການເຮັດໃຫ້ເຂົ້າໃຈຖືກຕາມຄວາມເປັນຈິງ ການບໍ່ຍົກຕົນ ການບໍ່ຂົ່ມຜູ້ອື່ນ ຍ່ອມເກີດຂຶ້ນດ້ວຍປະການແນວນີ້

ພາມ ແລະຄະຫະບໍດີທັງຫລາຍ ໃນລັດທິຂອງສະມະນະພາມເຫຼົ່ານັ້ນ ວິນຍູຊົນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ “ຖ້າໂລກໜ້າມີ ເມື່ອເປັນແນວນີ້ ບຸຣຸດບຸກຄົນນີ້ ຫລັງຈາກຕາຍແລ້ວຈັກໄປເກີດໃນສຸຄະຕິໂລກສະຫວັນ” ຖ້າໂລກໜ້າບໍ່ມີຈິງ ຄໍາຂອງສະມະນະພາມເຫຼົ່ານັ້ນຈະຈິງຫຼືບໍ່ກໍຊ່າງເທີ້ນ ເມື່ອເປັນເຊັ່ນນັ້ນ ບຸຣຸດບຸກຄົນນີ້ກໍຍ່ອມໄດ້ຮັບຄໍາສັນເສີນ ຈາກວິນຍູຊົນໃນປັດຈຸບັນວ່າ “ເປັນບຸຣຸດບຸກຄົນຜູ້ມີສີນ ເປັນສໍາມາທິດຖິ ເປັນອັດຖິກວາທະ”

ຖ້າໂລກໜ້າມີຈິງ ບຸຣຸດບຸກຄົນນີ້ກໍຈະໄດ້ຮັບຄຸນໃນໂລກທັງ ໒ ຄື (໑) ໃນປັດຈຸບັນວິນຍູຊົນຍ່ອມສັນເສີນ (໒) ຫລັງຈາກຕາຍແລ້ວຈັກໄປເກີດໃນສຸຄະຕິໂລກສະຫວັນ ແນວນີ້

ອະປັນນະກະທໍານີ້ ທີ່ບຸກຄົນນັ້ນສະມາທານໃຫ້ບໍລິບູນແລ້ວ ແຜ່ດິ່ງໄປທັງສອງຝ່າຍຍ່ອມລະເຫດທີ່ເປັນອະກຸສົນໄດ້ ດ້ວຍປະການແນວນີ້

## ອະກິຣິຍະທິດຖິກັບກິຣິຍະທິດຖິ

[໙໗] ພາມ ແລະຄະຫະບໍດີທັງຫລາຍ ມີສະມະນະພາມພວກໜຶ່ງຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ “ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ຜູ້ອື່ນເຮັດ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງໃຊ້ໃຫ້ຜູ້ອື່ນບຽດບຽນ ເຮັດໃຫ້ເສົ້າໂສກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ເສົ້າໂສກ ເຮັດໃຫ້ລໍາບາກເອງໃຊ້ໃຫ້ຜູ້ອື່ນເຮັດໃຫ້ລໍາບາກ ດີ້ນຮົນເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ດີ້ນຮົນ ຂ້າສັດ ຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ເຈາະປ່ອງຈອບລັກ ປຸ້ນເຮືອນຫລັງດຽວ ດັກຈີ້ໃນທາງປ່ຽວ ເປັນຊູ້ ເວົ້າຕົວະຜູ້ເຮັດ (ເຊັ່ນນັ້ນ) ກໍບໍ່ຈັດວ່າເຮັດບາບ

ແມ່ນຫາກບຸກຄົນໃຊ້ຈັກມີຄົມ ຄື ມີດແຖສັງຫານເຫຼົ່າສັດໃນປະຖະພີນີ້ໃຫ້ເປັນຄືລານຕາກຊີ້ນ ໃຫ້ເປັນກອງຊີ້ນດຽວກັນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກໍານັ້ນ ບໍ່ມີບາປບມາ ເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຂວາແມ່ນໍ້າຄົງຄາ ຂ້າເອງ ໃຊ້ໃຫ້ຜູ້ອື່ນຂ້າ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກໍານັ້ນ ບໍ່ມີບາບມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຊ້າຍແມ່ນໍ້າຄົງຄາ ໃຫ້ເອງ ໃຊ້ໃຫ້ຜູ້ອື່ນໃຫ້ ບູຊາເອງ ໃຊ້ໃຫ້ຜູ້ອື່ນບູຊາ ເຂົາຍ່ອມບໍ່ມີບຸນທີ່ເກີດຈາກກໍານັ້ນ ບໍ່ມີບຸນມາເຖິງເຂົາ ບໍ່ມີບຸນທີ່ເກີດຈາກການໃຫ້ທານຈາກການເຝິກອິນຊີ ຈາກການສັງລວມ ຈາກການເວົ້າຄໍາສັດ ບໍ່ມີບຸນມາເຖິງເຂົາ”

ສະມະນະພາມອີກພວກໜຶ່ງ ມີວາທະຂັດແຍ້ງກັນໂດຍກົງກັບສະມະນະພາມ ເຫຼົ່ານັ້ນພວກເຂົາກ່າວແນວນີ້ວ່າ “ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ຜູ້ອື່ນເຮັດ ຕັດເອງ ໃຊ້ໃຫ້ ຜູ້ອື່ນຕັດບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຮັດໃຫ້ເສົ້າໂສກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ ເສົ້າໂສກ ເຮັດ

ໃຫ້ລຳບາກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ລຳບາກ ດີ້ນຣົນເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ດີ້ນຣົນ ຂ້າສັດ ຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ເຈາະປ່ອງຈອບລັກ ປຸ້ນເຮືອນຫລັງດຽວ ດັກຈີ້ໃນທາງປ່ຽວ ເປັນຊູ້ ເວົ້າຕົວະ ຜູ້ເຮັດ(ເຊັ່ນນັ້ນ)ຈັດວ່າເຮັດບາບ

ແມ່ນຫາກບຸກຄົນໃຊ້ຈັກນິຄົມ ຄື ມີດແຖສັງຫານເຫຼົ່າສັດໃນປະຖະພີນີ້ໃຫ້ເປັນຄືລານຕາກຊີ້ນ ໃຫ້ເປັນກອງຊີ້ນດຽວກັນ ເຂົາຍ່ອມມີບາບທີ່ເກີດຈາກກຳນັ້ນ ມີບາບມາເຖິງເຂົາ ແມ່ນຫາກບຸກຄົນໄປຝັ່ງຂວາແມ່ນ້ຳຄົງຄາ ຂ້າເອງ ໃຊ້ໃຫ້ຜູ້ອື່ນຂ້າ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຂົາຍ່ອມມີບາບທີ່ເກີດຈາກກຳນັ້ນ ມີບາບ ມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຊ້າຍແມ່ນ້ຳຄົງຄາ ໃຫ້ເອງ ໃຊ້ໃຫ້ຜູ້ອື່ນໃຫ້ ບູຊາເອງ ໃຊ້ໃຫ້ ຜູ້ອື່ນບູຊາ ເຂົາຍ່ອມມີບຸນທີ່ເກີດຈາກກຳນັ້ນ ມີບຸນມາເຖິງເຂົາ ຍ່ອມມີບຸນທີ່ເກີດຈາກການໃຫ້ທານ ຈາກການເຝິກອິນຊີ ຈາກການສັງລວມ ຈາກການເວົ້າຄຳສັດ ມີບຸນມາເຖິງເຂົາ" ທ່ານທັງຫລາຍເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ສະມະນະພາມເຫລົ່ານີ້ມີວາທະຂັດແຍ້ງກັນໂດຍກົງ ບໍ່ແມ່ນບໍ?"

ພາມ ແລະຄະຫະບໍດີເຫຼົ່ານັ້ນຂາບທູນວ່າ "ແມ່ນ ຂ້ານ້ອຍ"

## ໂທດແຫ່ງການປະຕິບັດຜິດ

[໑໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ແລະຄະຫະບໍດີທັງຫລາຍ ບັນດາສະມະນະພາມ ໔ ຈຳພວກນັ້ນ ສະມະນະພາມເຫຼົ່າໃດຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ຜູ້ອື່ນເຮັດ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນ ບຽດບຽນ ເຮັດໃຫ້ເສົ້າໂສກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ເສົ້າໂສກ ເຮັດໃຫ້ລຳບາກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ລຳບາກ ດີ້ນຣົນເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ດີ້ນຣົນ ຂ້າສັດ ຖືເອົາສິ່ງຂອງທີ່ເຈົ້າຂອງເຂົາ ບໍ່ໄດ້ໃຫ້ ເຈາະປ່ອງຈອບລັກ ປຸ້ນເຮືອນຫລັງດຽວ ດັກຈີ້ໃນທາງປ່ຽວ ເປັນຊູ້ ເວົ້າຕົວະ ຜູ້ເຮັດ(ເຊັ່ນນັ້ນ) ກໍບໍ່ຈັດວ່າເຮັດບາບ

ແມ່ນຫາກບຸກຄົນໃຊ້ຈັກນິຄົມຄືມີດແຖສັງຫານເຫຼົ່າສັດ ໃນປະຖະພີນີ້ໃຫ້ເປັນຄືລານຕາກຊີ້ນ ໃຫ້ເປັນກອງຊີ້ນດຽວກັນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກຳນັ້ນ ບໍ່ມີບາບມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຂວາແມ່ນ້ຳຄົງຄາ ຂ້າເອງ ໃຊ້ໃຫ້ຜູ້ອື່ນຂ້າ ฯລฯ ບໍ່ມີບຸນທີ່ເກີດຈາກການໃຫ້ທານ ຈາກການເຝິກອິນຊີ ຈາກການສັງລວມ ຈາກການເວົ້າຄຳສັດ ບໍ່ມີບຸນມາເຖິງເຂົາ" ສະມະນະພາມເຫຼົ່ານັ້ນເພິ່ງຫວັງຂໍ້ນີ້ໄດ້ ຄື ຈັກເວັ້ນກຸສົນທຳ ໓ ປະການນີ້ ໄດ້ແກ່ (໑) ກາຍສຸດຈະຣິດ (໔) ວະຈີສຸຈະຣິດ (໓) ມະໂນສຸດຈະຣິດ ຈັກສະມາທານ ອະກຸສົນທຳ ໓ ປະການນີ້ ໄດ້ແກ່ (໑) ກາຍທຸດຈະຣິດ (໔) ວະຈີທຸດຈະຣິດ (໓) ມະໂນທຸດຈະຣິດ ແລ້ວປະພຶດຢູ່

ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນສະມະນະພາມເຫຼົ່ານັ້ນບໍ່ເຫັນໂທດ ຄວາມຕໍ່າຊາມ ຄວາມເສົ້າໝອງແຫ່ງອະກຸສົນທຳ ບໍ່ເຫັນອານິສົງໃນເນກຂຳມະອັນເປັນຝ່າຍຜ່ອງແຜ້ວແຫ່ງກຸສົນທຳ

ອັນໜຶ່ງ ການກະທຳມີຜົນ ແຕ່ເຂົາກັບເຫັນວ່າ "ການກະທຳບໍ່ມີຜົນ" ຄວາມເຫັນນັ້ນຂອງເຂົາຈຶ່ງເປັນມິດສາທິດຖິ ການກະທຳມີຜົນ ແຕ່ເຂົາດຳຣິວ່າ "ການກະທຳບໍ່ມີຜົນ" ຄວາມດຳຣິນັ້ນຂອງເຂົາຈຶ່ງເປັນມິດສາສັງກັບປະ ການກະທຳມີຜົນ ແຕ່ເຂົາກ່າວວ່າ "ການກະທຳບໍ່ມີຜົນ" ວາຈານັ້ນຂອງເຂົາຈຶ່ງເປັນມິດສາວາຈາ ການກະທຳມີຜົນ ເຂົາກ່າວ ວ່າ "ການກະທຳບໍ່ມີຜົນ" ຜູ້ນີ້ຍ່ອມເຮັດຕົນໃຫ້ເປັນຂ້າເສິກກັບພຣະອະຣະຫັນ ຜູ້ເປັນກິຣິຍະວາທະ ການກະທຳມີຜົນ ເຂົາເຮັດໃຫ້ຜູ້ອື່ນເຂົ້າໃຈວ່າ "ການກະທຳບໍ່ມີຜົນ" ການທີ່ເຂົາເຮັດໃຫ້ຜູ້ອື່ນ ເຂົ້າໃຈເຊັ່ນນັ້ນ ເປັນການເຮັດໃຫ້ເຂົ້າໃຈຜິດຈາກຄວາມເປັນຈິງ ແລະເຂົາຍັງຈະຍົກຕົນຂົ່ມຜູ້ອື່ນດ້ວຍການເຮັດໃຫ້ເຂົ້າໃຈຜິດຈາກຄວາມເປັນຈິງນັ້ນ ໂດຍໄນນີ້ ເລີ່ມຕົ້ນເຂົາກໍລະຖິ້ມຄວາມເປັນຜູ້ມີສິນດີງາມແລ້ວຕັ້ງຕົນເປັນຄົນທຸສິນ ຍ້ອນມິດສາທິດຖິເປັນປັດໄຈ ບາບອະກຸສົນທຳເປັນອະເນກເຫລົ່ານີ້ ຄື ມິດສາທິດຖິ ມິດສາສັງກັບປະ ມິດສາວາຈາ ຄວາມເປັນຂ້າເສິກກັບ ພຣະອະຣິຍະ ການເຮັດໃຫ້ຜູ້ອື່ນເຂົ້າໃຈຜິດຈາກຄວາມເປັນຈິງ ການຍົກຕົນ ການຂົ່ມຜູ້ອື່ນ ຍ່ອມເກີດຂຶ້ນ ດ້ວຍປະການແນວນີ້

ພາມ ແລະຄະຫະບໍດີທັງຫລາຍ ໃນລັດທິຂອງສະມະນະພາມເຫຼົ່ານັ້ນ ວິນຍູຊົນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ "ຖ້າການກະທຳບໍ່ມີຜົນ ເມື່ອເປັນແນວນີ້ ບຸຣຸດບຸກຄົນນີ້ ຫລັງຈາກຕາຍແລ້ວຈັກເຮັດຕົນໃຫ້ມີຄວາມໂດຍປອດໄພໄດ້ ຖ້າການກະທຳມີຜົນຈິງ ເມື່ອເປັນແນວນີ້ ບຸຣຸດບຸກຄົນນີ້ ຫລັງຈາກຕາຍແລ້ວຈັກໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ" ຖ້າການກະທຳບໍ່ມີຜົນຈິງ ຄຳຂອງສະມະນະພາມຜູ້ຈະເລີນເຫຼົ່ານັ້ນ ຈະຈິງຫຼືບໍ່ກໍຊ່າງເທີ້ນ ເມື່ອເປັນເຊັ່ນນັ້ນ ບຸຣຸດບຸກຄົນນີ້ຍ່ອມຖືກວິນຍູຊົນຕິຕຽນໄດ້ໃນປັດຈຸບັນວ່າ "ເປັນບຸຣຸດບຸກຄົນຜູ້ທຸສິນ ເປັນມິດສາທິດຖິ ເປັນອະກິຣິຍະວາທະ" ຖ້າການກະທຳມີຜົນຈິງ ບຸຣຸດບຸກຄົນຜູ້ຈະເລີນນີ້ຈະໄດ້ຮັບ ໂທດໃນໂລກທັງ ໒ ຄື (໑) ໃນປັດຈຸບັນຖືກວິນຍູຊົນຕິຕຽນໄດ້ (໒) ຫລັງຈາກຕາຍແລ້ວ ຈັກໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ແນວນີ້

ອະປັນນະກະທຳນີ້ ທີ່ບຸກຄົນນັ້ນສະມາທານໃຫ້ບໍລິບູນບໍ່ດີ ແຜ່ດິ່ງໄປຝ່າຍດຽວ ຍ່ອມລະເຫດທີ່ເປັນກຸສົນ ດ້ວຍປະການແນວນີ້

## ຄຸນແຫ່ງການປະຕິບັດຖືກຕ້ອງ

[໙໙] ພາມ ແລະຄະຫະບໍດີທັງຫລາຍ ໃນລັດທິຂອງສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ ຜູ້ອື່ນເຮັດ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຮັດໃຫ້ເສົ້າໂສກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ເສົ້າໂສກ ເຮັດໃຫ້ລຳບາກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ລຳບາກ ດີ້ນຮົນເອງ ໃຊ້ໃຫ້ ຜູ້ອື່ນ

ເຮັດໃຫ້ດີ້ນຣົນ ຂ້າສັດ ຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ເຈາະປ່ອງ ຈອບລັກ ປຸ້ນເຮືອນຫລັງດຽວ ດັກຈີ້ໃນທາງປ່ຽວ ເປັນຊູ້ ເວົ້າຕົວະ ຜູ້ເຮັດ (ເຊັ່ນນັ້ນ) ຈັດວ່ າເຮັດບາບ

ແມ່ນຫາກບຸກຄົນ ໃຊ້ຈັກມີຄົມຄືມີດແຖສັງຫານເຫຼົ່າສັດໃນປະຖະພີນີ້ໃຫ້ເປັນຄືລານຕາກຊີ້ນ ໃຫ້ເປັນກອງຊີ້ນດຽວກັນ ເຂົາຍ່ອມມີບາບທີ່ເກີດຈາກກຳນັ້ນ ມີບາບມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຂວາແມ່ນ້ຳຄົງຄາ ຂ້າເອງ ໃຊ້ໃຫ້ຜູ້ອື່ນຂ້າ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຂົາຍ່ອມມີບາບທີ່ເກີດຈາກກຳນັ້ນ ມີບາບ ມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຊ້າຍແມ່ນ້ຳຄົງຄາ ໃຫ້ເອງ ໃຊ້ໃຫ້ຜູ້ອື່ນໃຫ້ ບູຊາເອງ ໃຊ້ໃຫ້ຜູ້ອື່ນ ບູຊາ ເຂົາຍ່ອມມີບຸນທີ່ເກີດຈາກກຳນັ້ນ ມີບຸນມາເຖິງເຂົາ ຍ່ອມມີບຸນທີ່ເກີດຈາກການ ໃຫ້ທານ ຈາກການເຝິກອິນຊີ ຈາກການສັງລວມ ຈາກການເວົ້າຄຳສັດ ມີບຸນມາເຖິງເຂົາ" ສະມະນະພາມເຫຼົ່ານັ້ນເພິ່ງຫວັງຂໍ້ນີ້ໄດ້ ຄື ຈັກເວັ້ນອະກຸສົນທຳ ໓ ປະການນີ້ ໄດ້ແກ່ (໑) ກາຍທຸດຈະຣິດ (໒) ວະຈີທຸດຈະຣິດ (໓) ມະໂນທຸດຈະຣິດ ຈັກສະມາທານກຸສົນ ໓ ປະການນີ້ ໄດ້ແກ່ (໑) ກາຍສຸດຈະຣິດ (໒) ວະຈີສຸຈະຣິດ (໓) ມະໂນສຸດຈະຣິດ ແລ້ວປະພຶດຢູ່

ຂໍ້ນັ້ນຍ້ອນເຫດໃດ

ຍ້ອນສະມະນະພາມເຫຼົ່ານັ້ນ ເຫັນໂທດ ຄວາມຕ່ຳຊາມ ຄວາມເສົ້າໝອງແຫ່ງອະກຸສົນທຳ ເຫັນອານິສົງໃນເນກຂຳມະອັນເປັນຝ່າຍຜ່ອງແຜ້ວແຫ່ງກຸສົນທຳ

ອັນໜຶ່ງ ການກະທຳມີຜົນ ເຂົາເຫັນວ່າ "ການກະທຳມີຜົນຈິງ" ຄວາມເຫັນນັ້ນຂອງເຂົາຈຶ່ງເປັນສຳມາທິດຖິ ການກະທຳມີຜົນຈິງ ເຂົາດຳຣິວ່າ "ການກະທຳມີຜົນຈິງ" ຄວາມດຳຣິນັ້ນຂອງເຂົາຈຶ່ງເປັນສຳມາສັງກັບປະ ການກະທຳມີຜົນຈິງ ເຂົາກ່າວວ່າ "ການກະທຳມີຜົນຈິງ" ວາຈານັ້ນຂອງເຂົາຈຶ່ງເປັນສຳມາວາຈາ ການກະທຳມີຜົນຈິງ ເຂົາກ່າວວ່າ "ການກະທຳມີຜົນຈິງ" ຜູ້ນີ້ຊື່ວ່າ ບໍ່ເຮັດຕົນເປັນຂ້າເສິກກັບພຣະອະຣະຫັນຜູ້ເປັນກິຣິຍະວາທະ ການກະທຳມີຜົນຈິງ ເຂົາເຮັດໃຫ້ຜູ້ອື່ນເຂົ້າໃຈວ່າ "ການກະທຳມີຜົນຈິງ" ການທີ່ເຂົາເຮັດໃຫ້ ຜູ້ອື່ນເຂົ້າໃຈເຊັ່ນນັ້ນ ເປັນການເຮັດໃຫ້ເຂົ້າໃຈຖືກຕາມຄວາມເປັນຈິງ ແລະ ເຂົາຍ່ອມບໍ່ຍົກຕົນ ຂົ່ມຜູ້ອື່ນ ດ້ວຍການເຮັດໃຫ້ເຂົ້າໃຈຖືກຕາມຄວາມເປັນຈິງນັ້ນ ໂດຍໄນນີ້ ເລີ່ມຕົ້ນເຂົາກໍລະຖິ້ມຄວາມເປັນຜູ້ທຸສິນແລ້ວຕັ້ງຕົນເປັນຄົນມີສິນດີງາມ ຍ້ອນສຳມາທິດຖິເປັນປັດໄຈ ກຸສົນທຳ ເປັນອະເນກເຫລົ່ານີ້ ຄື ສຳມາທິດຖິ ສຳມາສັງກັບປະ ສຳມາວາຈາ ຄວາມບໍ່ເປັນຂ້າເສິກ ກັບພຣະອະຣິຍະ ການເຮັດໃຫ້ເຂົ້າໃຈຖືກຕາມຄວາມເປັນຈິງ ການບໍ່ຍົກຕົນ ການບໍ່ຂົ່ມຜູ້ອື່ນ ຍ່ອມເກີດຂຶ້ນ ດ້ວຍປະການແນວນີ້

ພາມ ແລະ ຄະຫະບໍດີທັງຫລາຍ ໃນລັດທິຂອງສະມະນະພາມເຫຼົ່ານັ້ນ ວິນຍູຊົນຍ່ອມ

ເຫັນປະຈັກແຈ້ງດັ່ງນີ້ວ່າ "ຖ້າການກະທຳມີຜົນຈິງ ເມື່ອເປັນແນວນີ້ ບຸຣຸດບຸກຄົນນີ້ຫລັງຈາກຕາຍແລ້ວຈັກໄປເກີດໃນສຸຄະຕິໂລກສະຫວັນ ຖ້າການກະທຳບໍ່ມີຜົນຈິງ ຄຳຂອງ ສະມະນະພາມເຫຼົ່ານັ້ນຈະຈິງຫຼືບໍ່ກໍ່ຊ່າງເຫີ້ນ ເມື່ອເປັນເຊັ່ນນັ້ນ ບຸຣຸດບຸກຄົນນີ້ກໍຍ່ອມໄດ້ຮັບຄຳສັນເສີນຈາກວິນຍູຊົນໃນປັດຈຸບັນວ່າ "ເປັນບຸຣຸດບຸກຄົນຜູ້ມີສີນ ເປັນສຳມາທິດຖິ ເປັນກີຣິຍະວາທະ" ຖ້າການກະທຳມີຜົນຈິງ ບຸຣຸດບຸກຄົນນີ້ກໍຈະໄດ້ຮັບຄຸນໃນໂລກທັງ ໒ ຄື (໑) ໃນປັດຈຸບັນວິນຍູຊົນຍ່ອມສັນເສີນ (໒) ຫລັງຈາກຕາຍແລ້ວ ຈັກໄປເກີດໃນສຸຄະຕິ ໂລກສະຫວັນ ແນວນີ້

ອະປັນນະກະທຳ ທີ່ບຸກຄົນນັ້ນສະມາທານໃຫ້ບໍລິບູນດີແລ້ວ ແຜ່ດີ່ງໄປທັງສອງຝ່າຍ ຍ່ອມລະເຫດທີ່ເປັນອະກຸສົນໄດ້ ດ້ວຍປະການແນວນີ້

## ເຫຕຸກະທິດຖິກັບອະເຫຕຸກະທິດຖິ

[໑໐໐] ພາມ ແລະຄະຫະບໍດີທັງຫລາຍ ມີສະມະນະພາມພວກໜຶ່ງຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຄວາມເສົ້າໝອງຂອງສັດທັງຫລາຍບໍ່ມີເຫດ ບໍ່ມີປັດໄຈ ສັດທັງຫລາຍ ເສົ້າໝອງເອງ ຄວາມບໍລິສຸດຂອງສັດທັງຫລາຍ ບໍ່ມີເຫດ ບໍ່ມີປັດໄຈ ສັດທັງຫລາຍບໍລິສຸດເອງ ບໍ່ມີກຳລັງ ບໍ່ມີຄວາມພຽນ ບໍ່ມີຄວາມສາມາດຂອງມະນຸດ ບໍ່ມີຄວາມພະຍາຍາມຂອງມະນຸດ ສັດ ປານະ ພູຕະ ຊີວະທັງປວງ ລ້ວນບໍ່ມີອຳນາດ ບໍ່ມີກຳລັງ ບໍ່ມີຄວາມພຽນ ຜັນແປໄປຕາມໂຊກຊະຕາ ຕາມສະຖານພາບທາງສັງຄົມ ແລະຕາມລັກສະໃນສະເພາະຕົນ ຍ່ອມສະເຫວີຍສຸກແລະທຸກໃນອະພິຊາດທັງ ໖"

ພາມ ແລະຄະຫະບໍດີທັງຫລາຍ ສະມະນະພາມອີກພວກໜຶ່ງ ມີວາທະຂັດແຍ້ງໂດຍກົງກັບສະມະນະພາມເຫຼົ່ານັ້ນ ພວກເຂົາກ່າວແນວນີ້ວ່າ "ຄວາມເສົ້າໝອງຂອງສັດທັງຫລາຍມີເຫດມີປັດໄຈ ສັດທັງຫລາຍເສົ້າໝອງເອງ ຄວາມບໍລິສຸດຂອງສັດທັງຫລາຍມີເຫດ ມີປັດໄຈ ສັດທັງຫລາຍບໍລິສຸດເອງ ມີກຳລັງ ມີຄວາມພຽນ ມີຄວາມສາມາດຂອງມະນຸດ ມີຄວາມພະຍາຍາມຂອງມະນຸດ ສັດ ປານະ ພູຕະ ຊີວະທັງປວງ ບໍ່ແມ່ນບໍ່ມີອຳນາດ ບໍ່ມີກຳລັງ ບໍ່ມີຄວາມພຽນ ຜັນແປໄປຕາມໂຊກຊະຕາ ຕາມສະຖານພາບທາງສັງຄົມແລະຕາມລັກສະນະສະເພາະຕົນສະເຫວີຍສຸກແລະທຸກໃນອະພິຊາດທັງ ໖" ທ່ານທັງຫລາຍ ເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ສະມະນະພາມເຫລົ່ານີ້ມີວາທະຂັດແຍ້ງກັນໂດຍກົງ ບໍ່ແມ່ນບໍ?"

ພາມ ແລະຄະຫະບໍດີເຫຼົ່ານັ້ນຂາບທູນວ່າ "ແມ່ນ ຂ້ານ້ອຍ"

## ໂທດແຫ່ງການປະຕິບັດຜິດ

[໑໐໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມແລະຄະຫະບໍດີທັງຫລາຍ ໃນລັດທິຂອງ

ສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຄວາມເສົ້າໝອງຂອງສັດທັງຫລາຍ ບໍ່ມີເຫດ ບໍ່ມີປັດໄຈ ສັດທັງຫລາຍເສົ້າໝອງເອງ ຄວາມບໍລິສຸດຂອງສັດທັງຫລາຍ ບໍ່ມີເຫດ ບໍ່ມີປັດໄຈ ສັດທັງຫລາຍບໍລິສຸດເອງ ບໍ່ມີກຳລັງ ບໍ່ມີຄວາມພຽນ ບໍ່ມີຄວາມສາມາດຂອງມະນຸດ ບໍ່ມີຄວາມພະຍາຍາມຂອງມະນຸດ ສັດ ປານະ ພູຕະ ຊີວະທັງປວງລ້ວນບໍ່ມີອຳນາດ ບໍ່ມີກຳລັງ ບໍ່ມີຄວາມພຽນ ຜັນແປໄປຕາມໂຊກຊະຕາ ຕາມສະຖານພາບທາງສັງຄົມແລະຕາມລັກສະນະສະເພາະຕົນ ຍ່ອມສະເຫວີຍສຸກແລະທຸກໃນອະພິຊາດທັງ ໖" ສະມະນະພາມເຫຼົ່ານັ້ນເພິ່ງຫວັງຂໍ້ນີ້ໄດ້ ຄື ຈັກເວັ້ນກຸສົນທຳ ໓ ປະການນີ້ ໄດ້ແກ່ (໑) ກາຍສຸດຈະຣິດ (໒) ວະຈີສຸຈະຣິດ (໓) ມະໂນສຸດຈະຣິດ ຈັກສະມາທານ ອະກຸສົນທຳ ໓ ປະການນີ້ໄດ້ແກ່ (໑) ກາຍທຸດຈະຣິດ (໒) ວະຈີທຸດຈະຣິດ (໓) ມະໂນທຸດຈະຣິດ ແລ້ວປະພຶດຢູ່

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນສະມະນະພາມເຫຼົ່ານັ້ນ ບໍ່ເຫັນໂທດ ຄວາມຕ່ຳຊາມ ຄວາມເສົ້າໝອງແຫ່ງອະກຸສົນທຳ ບໍ່ເຫັນອານິສົງໃນເນກຂຳມະອັນເປັນຝ່າຍຜ່ອງແຜ້ວແຫ່ງກຸສົນທຳ

ອັນໜຶ່ງ ເຫດມີຢູ່ ແຕ່ເຂົາກັບເຫັນວ່າ "ເຫດບໍ່ມີ" ຄວາມເຫັນນັ້ນຂອງເຂົາຈຶ່ງເປັນມິດສາທິດຖິ ເຫດມີຢູ່ ແຕ່ເຂົາດຳຣິວ່າ "ເຫດບໍ່ມີ" ຄວາມດຳຣິນັ້ນຂອງເຂົາຈຶ່ງເປັນມິດສາສັງກັບປະ ເຫດມີຢູ່ ແຕ່ເຂົາກ່າວວ່າ "ເຫດບໍ່ມີ" ວາຈານັ້ນຂອງເຂົາຈຶ່ງເປັນມິດສາວາຈາ "ເຫດມີຢູ່" ເຂົາກ່າວວ່າ "ເຫດບໍ່ມີ" ຜູ້ນີ້ຍ່ອມເຮັດຕົນໃຫ້ເປັນຂ້າເສິກກັບພຣະອະຣະຫັນຜູ້ເປັນເຫຕຸກະວາທະ ເຫດມີຢູ່ ເຂົາເຮັດໃຫ້ຜູ້ອື່ນເຂົ້າໃຈວ່າ "ເຫດບໍ່ມີ" ການທີ່ເຂົາເຮັດໃຫ້ຜູ້ອື່ນເຂົ້າໃຈເຊັ່ນນັ້ນ ເປັນການເຮັດໃຫ້ເຂົ້າໃຈຜິດຈາກຄວາມເປັນຈິງ ແລະ ເຂົາຍັງຈະຍົກຕົນຂົ່ມຜູ້ອື່ນດ້ວຍການເຮັດໃຫ້ເຂົ້າໃຈຜິດຈາກຄວາມເປັນຈິງນັ້ນ ໂດຍໄນນີ້ ເລີ່ມຕົ້ນເຂົາກໍລະຖິ້ມຄວາມເປັນຜູ້ມີສິນດີງາມແລ້ວຕັ້ງຕົນເປັນຄົນທຸສິນ ຍ້ອນມິດສາທິດຖິເປັນປັດໄຈ ບາບອະກຸສົນທຳເປັນອະເນກເຫລົ່ານີ້ ຄື ມິດສາທິດຖິ ມິດສາສັງກັບປະ ມິດສາວາຈາ ຄວາມເປັນຂ້າເສິກກັບພຣະອະຣິຍະ ການເຮັດໃຫ້ຜູ້ອື່ນເຂົ້າໃຈຜິດຈາກຄວາມເປັນຈິງ ການຍົກຕົນ ການຂົ່ມຜູ້ອື່ນ ຍ່ອມເກີດຂຶ້ນ ດ້ວຍປະການແນວນີ້

ພາມ ແລະຄະຫະບໍດີທັງຫລາຍ ໃນລັດທິຂອງສະມະນະພາມເຫຼົ່ານັ້ນ ວິນຍູຊົນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ "ຖ້າເຫດບໍ່ມີ ເມື່ອເປັນແນວນີ້ ບຸຣຸດບຸກຄົນນີ້ ຫລັງຈາກ ຕາຍແລ້ວຈັກເຮັດຕົນໃຫ້ມີຄວາມໂດຍປອດໄພໄດ້ ຖ້າເຫດມີຢູ່ຈິງ ເມື່ອເປັນແນວນີ້ ບຸຣຸດ ບຸກຄົນນີ້ ຫລັງຈາກຕາຍແລ້ວ ຈັກໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ" ຖ້າຍອົມຮັບວ່າ ເຫດບໍ່ມີຈິງຄຳຂອງສະມະນະພາມຜູ້ຈະເລີນເຫຼົ່ານັ້ນຈະຈິງຫຼືບໍ່ກໍຊ່າງເທີ້ນ ເມື່ອເປັນ ເຊັ່ນນັ້ນ ບຸຣຸດບຸກຄົນນີ້ຍ່ອມຖືກວິນຍູຊົນຕິຕຽນໄດ້ໃນປັດຈຸບັນວ່າ "ເປັນບຸຣຸດບຸກຄົນຜູ້ທຸສິນ ເປັນມິດສາທິດຖິ ເປັນອະ

ເຫຕຸກະວາທະ" ຖ້າເຫດມີຢູ່ຈິງ ບຸຣຸດບຸກຄົນນີ້ຈະໄດ້ຮັບໂທດໃນໂລກ ທັງ ໒ ຄື (໑) ໃນປັດຈຸບັນຖືກວິນຍູຊົນຕິຕຽນໄດ້ (໒) ຫລັງຈາກຕາຍແລ້ວ ຈັກໄປເກີດ ໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ແນວນີ້

ອະປັນນະກະທຳນີ້ ທີ່ບຸກຄົນນັ້ນ ສະມາທານໃຫ້ບໍລິບູນບໍ່ດີ ແຜ່ດິ່ງໄປຝ່າຍດຽວ ຍ່ອມລະເຫດທີ່ເປັນກຸສົນ ດ້ວຍປະການແນວນີ້

## ຄຸນແຫ່ງການປະຕິບັດຖືກຕ້ອງ

[໑໐໒] ພາມ ແລະຄະຫະບໍດີທັງຫລາຍ ໃນລັດທິຂອງສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຄວາມເສົ້າໝອງຂອງສັດທັງຫລາຍມີເຫດ ມີປັດໄຈ ສັດທັງຫລາຍຈຶ່ງເສົ້າໝອງ ຄວາມບໍລິສຸດຂອງສັດທັງຫລາຍ ມີເຫດ ມີປັດໄຈ ສັດທັງຫລາຍຈຶ່ງບໍລິສຸດ ມີກຳລັງ ມີຄວາມພຽນ ມີຄວາມສາມາດຂອງມະນຸດ ມີຄວາມພະຍາຍາມຂອງມະນຸດ ສັດ ປານະ ພູຕະ ຊີວະທັງປວງ ລ້ວນບໍ່ມີອຳນາດ ບໍ່ມີກຳລັງ ບໍ່ມີຄວາມພຽນ ຜັນແປໄປຕາມໂຊກຊະຕາ ຕາມສະຖານພາບທາງສັງຄົມແລະ ຕາມລັກສະນະສະເພາະຂອງຕົນຍ່ອມບໍ່ໄດ້ສະເຫວີຍສຸກແລະທຸກໃນອະພິຊາດທັງ ໖" ສະມະນະພາມ ເຫຼົ່ານັ້ນເພິ່ງຫວັງຂໍ້ນີ້ໄດ້ຄື ຈັກເວັ້ນອະກຸສົນທຳ ໓ ປະການນີ້ ໄດ້ແກ່ (໑) ກາຍທຸດຈະຣິດ (໒) ວະຈີທຸດຈະຣິດ (໓) ມະໂນທຸດຈະຣິດ ຈັກສະມາທານກຸສົນທຳ ໓ ປະການນີ້ ໄດ້ແກ່ (໑) ກາຍສຸດຈະຣິດ (໒) ວະຈີສຸຈະຣິດ (໓) ມະໂນສຸດຈະຣິດ ແລ້ວປະພຶດຢູ່

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນສະມະນະພາມເຫຼົ່ານັ້ນ ເຫັນໂທດ ຄວາມຕ່ຳຊາມ ຄວາມເສົ້າໝອງແຫ່ງອະກຸສົນທຳ ເຫັນອານິສົງໃນເນກຂຳມະອັນເປັນຝ່າຍຜ່ອງແຜ້ວແຫ່ງກຸສົນທຳ

ອັນໜຶ່ງ ເຫດມີຢູ່ ເຂົາເຫັນວ່າ "ເຫດມີຢູ່ຈິງ" ຄວາມເຫັນນັ້ນຂອງເຂົາຈຶ່ງເປັນສຳມາທິດຖິ ເຫດມີຢູ່ຈິງ ເຂົາດຳຣິວ່າ "ເຫດມີຢູ່ຈິງ" ຄວາມດຳຣິນັ້ນຂອງເຂົາຈຶ່ງເປັນສຳມາສັງກັບປະ ເຫດມີຢູ່ຈິງ ເຂົາກ່າວວ່າ "ເຫດມີຢູ່ຈິງ" ວາຈານັ້ນຂອງເຂົາຈຶ່ງເປັນສຳມາວາຈາ ເຫດມີຢູ່ຈິງ ເຂົາກ່າວວ່າ "ເຫດມີຢູ່ຈິງ" ຜູ້ນີ້ຊື່ວ່າບໍ່ເຮັດຕົນໃຫ້ເປັນຂ້າເສິກກັບພຣະອະຣະຫັນຜູ້ເປັນເຫຕຸກະວາທະ ເຫດມີຢູ່ຈິງ ເຂົາເຮັດໃຫ້ຜູ້ອື່ນເຂົ້າໃຈວ່າ "ເຫດມີຢູ່ຈິງ" ການທີ່ເຂົາເຮັດໃຫ້ ຜູ້ອື່ນເຂົ້າໃຈເຊັ່ນນັ້ນ ເປັນການເຮັດໃຫ້ເຂົ້າໃຈຖືກຕາມຄວາມເປັນຈິງ ແລະເຂົາຍ່ອມບໍ່ຍົກຕົນ ຂົ່ມຜູ້ອື່ນດ້ວຍການເຮັດໃຫ້ເຂົ້າໃຈຖືກຕາມຄວາມເປັນຈິງນັ້ນ ໂດຍໄນນີ້ ເລີ່ມຕົ້ນເຂົາກໍລະຖິ້ມຄວາມເປັນຜູ້ທຸສິນແລ້ວຕັ້ງຕົນເປັນຄົນມີສິນດີງາມ ຍ້ອນສຳມາທິດຖິເປັນປັດໄຈ ກຸສົນທຳ ເປັນອະເນກເຫລົ່ານີ້ ຄື ສຳມາທິດຖິ ສຳມາສັງກັບປະ ສຳມາວາຈາ ຄວາມບໍ່ເປັນຂ້າເສິກ ກັບພຣະອະຣິຍະ

ການເຮັດໃຫ້ເຂົ້າໃຈຖືກຕາມຄວາມເປັນຈິງ ການບໍ່ຍົກຕົນ ການບໍ່ຂົ່ມຜູ້ອື່ນ ຍ່ອມເກີດຂຶ້ນ ດ້ວຍປະການແນວນີ້

ພາມ ແລະຄະຫະບໍດີທັງຫລາຍ ໃນລັດທິຂອງສະມະນະພາມເຫຼົ່ານັ້ນ ວິນຍູຊົນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ “ຖ້າເຫດມີຢູ່ ເມື່ອເປັນແນວນີ້ ບຸຣຸດບຸກຄົນນີ້ ຫລັງຈາກ ຕາຍແລ້ວຈັກໄປເກີດໃນສຸຄະຕິໂລກສະຫວັນ ຖ້າຍອົມຮັບວ່າເຫດບໍ່ມີຈິງ ຄຳຂອງສະມະນະພາມ ເຫຼົ່ານັ້ນຈະຈິງຫຼືບໍ່ກໍຊ່າງເທີ້ນ ເມື່ອເປັນເຊັ່ນນັ້ນ ບຸຣຸດບຸກຄົນນີ້ກໍຍ່ອມໄດ້ຮັບຄຳສັນເສີນ ຈາກວິນຍູຊົນໃນປັດຈຸບັນວ່າ “ເປັນບຸຣຸດບຸກຄົນຜູ້ມີສີນ ມີສຳມາທິດຖິ ເປັນເຫຕຸກະວາທະ” ຖ້າເຫດມີຢູ່ຈິງບຸຣຸດບຸກຄົນນີ້ ກໍຈະໄດ້ຮັບຄຸນໃນໂລກທັງ ໒ ຄື (໑) ໃນປັດຈຸບັນວິນຍູຊົນຍ່ອມສັນເສີນ (໒) ຫລັງຈາກຕາຍແລ້ວຈັກໄປເກີດໃນສຸຄະຕິໂລກສະຫວັນ ແນວນີ້

ອະປັນນະກະທຳນີ້ ທີ່ບຸກຄົນນັ້ນສະມາທານໃຫ້ບໍລິບູນດີແລ້ວແນວນີ້ ແຜ່ດົ່ງໄປທັງສອງຝ່າຍ ຍ່ອມລະເຫດທີ່ເປັນອະກຸສົນໄດ້ ດ້ວຍປະການແນວນີ້

## ຄວາມຂັດແຍ້ງກັນເລື້ອງອະຣູບປະພົມ

[໑໐໓] ພາມ ແລະຄະຫະບໍດີທັງຫລາຍ ມີສະມະນະພາມພວກໜຶ່ງຜູ້ມີວາທະແນວນີ້ມີທິດຖິແນວນີ້ວ່າ “ອະຣູບປະພົມບໍ່ມີໂດຍປະການທັງປວງ” ສະມະນະພາມອີກພວກໜຶ່ງ ມີວາທະຂັດແຍ້ງໂດຍກົງກັບສະມະນະພາມເຫຼົ່ານັ້ນ ພວກເຂົາກ່າວແນວນີ້ວ່າ “ອະຣູບປະພົມ ມີຢູ່ໂດຍປະການທັງປວງ” ທ່ານທັງຫລາຍເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ສະມະນະພາມ ເຫລົ່ານີ້ມີວາທະຂັດແຍ້ງກັນໂດຍກົງ ບໍ່ແມ່ນບໍ”

“ແມ່ນ ຂ້ານ້ອຍ”

“ພາມແລະຄະຫະບໍດີທັງຫລາຍ ໃນລັດທິຂອງສະມະນະພາມພວກນັ້ນ ວິນຍູຊົນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ “ການທີ່ສະມະນະພາມທັງຫລາຍມີວາທະແນວນີ້ ມີທິດຖິ ແນວນີ້ວ່າ “ອະຣູບປະພົມບໍ່ມີໂດຍປະການທັງປວງ” ເຮົາບໍ່ເຫັນດ້ວຍ ແມ່ນການທີ່ສະມະນະພາມທັງຫລາຍຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ “ອະຣູບປະພົມມີຢູ່ໂດຍປະການທັງປວງ” ເຮົາກໍບໍ່ຮັບຮູ້ດ້ວຍ ສ່ວນເຮົາເອງ ເມື່ອບໍ່ຮູ້ ບໍ່ເຫັນ ຈະເພິ່ງຖືເອົາຝ່າຍດຽວ ກ່າວວ່າ “ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ” ຂໍ້ນັ້ນບໍ່ເປັນການສົມຄວນແກ່ເຮົາເລີຍ ຖ້າຄຳຂອງສະມະນະພາມທັງຫລາຍ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ “ອະຣູບປະພົມບໍ່ມີໂດຍປະການທັງປວງ” ເປັນຄຳຈິງແລ້ວ ເປັນໄປໄດ້ທີ່ເຮົາຈັກເກີດໃນເຫຼົ່າເທບຜູ້ມີຣູບສຳເລັດດ້ວຍໃຈ ເຊິ່ງບໍ່ ຖືວ່າຜິດ ຖ້າຄຳຂອງສະມະນະພາມທັງຫລາຍຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ “ອະຣູບປະພົມມີຢູ່ໂດຍປະການທັງປວງ” ເປັນຄຳຈິງແລ້ວ ເປັນໄປໄດ້ທີ່ເຮົາຈັກເກີດໃນເຫຼົ່າເທບ ຜູ້ບໍ່ມີຣູບສຳເລັດດ້ວຍສັນຍາເຊິ່ງບໍ່ຖືວ່າຜິດ ອັນ

ໜຶ່ງ ການຖືໄມ້ຄ້ອນ ການຖືອາວຸດ ການຜິດຖຽງ ການຍາດແຍ່ງ ໂຕ້ຖຽງ ການເວົ້າຂຶ້ນສຽງວ່າ "ເຈົ້າ ເຈົ້າ" ການເວົ້າສັບສໍ່ແລະການເວົ້າຕົວະເຊິ່ງມີຮູບເປັນເຫດຍ່ອມຜາກົດ ແຕ່ຂໍ້ນີ້ຍ່ອມບໍ່ມີໃນອະຮູບປະພົມໂດຍປະການທັງປວງ" ວິນຍູຊົນນັ້ນເມື່ອພິຈາລະນາດັ່ງນີ້ແລ້ວຍ່ອມປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບແຫ່ງຮູບ ແນວດຽວ

## ຄວາມຂັດແຍ້ງເລື້ອງພົບ

[໑໐໔] ພາມ ແລະຄະຫະບໍດີທັງຫລາຍ ມີສະມະນະພາມພວກຫນຶ່ງຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຄວາມດັບສະນິດແຫ່ງພົບບໍ່ມີໂດຍປະການທັງປວງ" ສະມະນະພາມ ອີກພວກຫນຶ່ງ ມີວາທະຂັດແຍ້ງໂດຍກົງກັບສະມະນະພາມເຫຼົ່ານັ້ນ ພວກເຂົາກ່າວ ແນວນີ້ວ່າ "ຄວາມດັບສະນິດແຫ່ງພົບມີຢູ່ໂດຍປະການທັງປວງ" ທ່ານທັງຫລາຍເຂົ້າໃຈຄວາມ ຂໍ້ນັ້ນວ່າແນວໃດ ສະມະນະພາມເຫລົ່ານີ້ ມີວາທະຂັດແຍ້ງກັນໂດຍກົງ ບໍ່ແມ່ນບໍ?"

"ແມ່ນ ຂ້ານ້ອຍ"

"ພາມ ແລະຄະຫະບໍດີທັງຫລາຍ ໃນລັດທິຂອງສະມະນະພາມເຫຼົ່ານັ້ນ ວິນຍູຊົນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ "ການທີ່ສະມະນະພາມທັງຫລາຍຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຄວາມດັບສະນິດແຫ່ງພົບບໍ່ມີໂດຍປະການທັງປວງ" ເຮົາບໍ່ເຫັນດ້ວຍ ແມ່ນການທີ່ສະມະນະພາມທັງຫລາຍຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຄວາມດັບສະນິດແຫ່ງພົບ ມີຢູ່ໂດຍປະການທັງປວງ" ເຮົາກໍບໍ່ຮັບຮູ້ດ້ວຍ ສ່ວນເຮົາເອງ ເມື່ອບໍ່ຮູ້ ບໍ່ເຫັນ ຈະຖືເອົາຝ່າຍດຽວແລ້ວກ່າວວ່າ "ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ຂໍ້ນັ້ນ ບໍ່ເປັນການສົມຄວນ ແກ່ເຮົາເລີຍ ຖ້າຄຳຂອງສະມະນະພາມທັງຫລາຍຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຄວາມດັບສະນິດແຫ່ງພົບບໍ່ມີໂດຍປະການທັງປວງ" ເປັນຄຳຈິງແລ້ວ ເປັນໄປໄດ້ທີ່ເຮົາ ຈັກເກີດໃນເຫຼົ່າເທບຜູ້ບໍ່ມີຮູບສຳເລັດດ້ວຍສັນຍາເຊິ່ງບໍ່ຖືວ່າຜິດ ອັນໜຶ່ງ ຖ້າຄຳຂອງສະມະນະພາມທັງຫລາຍຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຄວາມດັບສະນິດແຫ່ງພົບມີຢູ່ໂດຍປະການທັງປວງ" ເປັນຄຳຈິງແລ້ວ ເປັນໄປໄດ້ທີ່ເຮົາຈັກປະຣິນິບພານໃນປັດຈຸບັນ ຄວາມເຫັນຂອງສະມະນະພາມທັງຫລາຍຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຄວາມດັບສະນິດແຫ່ງພົບບໍ່ມີໂດຍປະການທັງປວງ" ນີ້ໃກ້ຕໍ່ທຳທີ່ຍັງມີຄວາມກຳໜັດ ໃກ້ຕໍ່ທຳທີ່ຍັງມີສັງໂຍດ ໃກ້ຕໍ່ທຳທີ່ຍັງມີຄວາມເພີດເພີນ ໃກ້ຕໍ່ທຳທີ່ມີຄວາມຈົດຈໍ່ ໃກ້ຕໍ່ທຳທີ່ຍັງມີຄວາມຖືໝັ້ນ ສ່ວນຄວາມເຫັນຂອງສະມະນະພາມທັງຫລາຍຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ຄວາມດັບສະນິດແຫ່ງພົບມີຢູ່ໂດຍປະການທັງປວງ" ນີ້ໃກ້ຕໍ່ທຳທີ່ ບໍ່ມີຄວາມກຳໜັດ ໃກ້ຕໍ່ທຳທີ່ບໍ່ມີສັງໂຍດ ໃກ້ຕໍ່ທຳທີ່ບໍ່ມີຄວາມເພີດເພີນ ໃກ້ຕໍ່ທຳທີ່ບໍ່ມີຄວາມຈົດຈໍ່ ໃກ້ຕໍ່ທຳທີ່ບໍ່ມີຄວາມຖືໝັ້ນ ວິນຍູຊົນນັ້ນ ເມື່ອພິຈາລະນາດັ່ງນີ້ແລ້ວຍ່ອມປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບແຫ່ງພົບ ແນວດຽວ

# ບຸກຄົນ ໔ ປະເພດ

[໑໐໕] ພາມແລະຄະຫະບໍດີທັງຫລາຍ ບຸກຄົນ ໔ ປະເພດນີ້ ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ປະເພດ ໃດແດ່
ຄື ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ
໒. ເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ
໓. ເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ
໔. ເປັນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນແລະເປັນຜູ້ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ

ບຸກຄົນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນນັ້ນ ເປັນຜູ້ບໍ່ຫິວ ດັບຮ້ອນ ເຢັນໃຈ ມີຕົນອັນປະເສີດ ສະເຫວີຍສຸກຢູ່ໃນປັດຈຸບັນ

[໑໐໖] ບຸກຄົນເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນອະເຈລະກະ (ປະພຶດເປືອຍກາຍ) ບໍ່ມີມາຣະຍາດເລຍ ມີ ຯລຯ ຖືການກ້າວແລະອົບກາຍຫຼາຍຮູບແບບຢູ່ ດ້ວຍປະການແນວນີ້

ພາມ ແລະຄະຫະບໍດີທັງຫລາຍ ບຸກຄົນນີ້ຮຽກວ່າ ເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ

ບຸກຄົນເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ຂ້າແບ້ ຂ້າໝູ ຯລຯ ຫຼື ລາງພວກເປັນຜູ້ທຳການທາລຸນ

ພາມ ແລະຄະຫະບໍດີທັງຫລາຍ ບຸກຄົນນີ້ຮຽກວ່າ ເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ

ບຸກຄົນເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນແລະ

ເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ເປັນພຣະຣາຊາມະຫາກະສັດຜູ້ໄດ້ຮັບມຸດທາພິເສກແລ້ວກໍດີ ฯລฯ໖ ເຫຼົ່າຊົນຜູ້ເປັນຂ້າທາດກໍດີ ເປັນຄົນຮັບໃຊ້ກໍດີ ເປັນຄົນງານກໍດີ ຂອງພຣະຣາຊານັ້ນ ຖືກອາດຍາຄຸກຄາມ ຖືກໄພຄຸກຄາມ ມີນ້ຳຕານອງໜ້າ ຮ້ອງໄຫ້ໄປທຳງານໄປ

ພາມ ແລະຄະຫະບໍດີທັງຫລາຍ ບຸກຄົນນີ້ຮຽກວ່າ ເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະ ເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ

ບຸກຄົນເປັນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເຂົາບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນຜູ້ບໍ່ຫິວ ດັບຮ້ອນ ເຢັນໃຈ ມີຕົນອັນປະເສີດ ສະເຫວີຍສຸກຢູ່ໃນປັດຈຸບັນ ເປັນແນວໃດ?

ຄື ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍຕົນເອງໂດຍຖືກຕ້ອງ ฯລฯ

ພິກຂຸນັ້ນເມື່ອລະນິວອນ ໕ ປະການນີ້ທີ່ເປັນເຄື່ອງເສົ້າໝອງແຫ່ງຈິດ ເປັນເຄື່ອງທອນກຳລັງປັນຍາແລ້ວ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫລາຍແລ້ວ ບັນລຸປະຖົມຊານ ທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸ ທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ຍ້ອນປີຕິຈາງຄາຍອອກ ບັນລຸຕະຕິຍະຊານ ฯລฯ ຢູ່ ຍ້ອນລະສຸກ ແລະ ທຸກໄດ້ ຍ້ອນໂສມະນັດ ແລະໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານ ฯລฯ ຢູ່

## ວິດຊາ ໓

ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອປຸບເພນິວາສານຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໔ ຊາດແດ່ ฯລฯ ທ່ານຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້

ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປ ເພື່ອຈຸຕູ

ປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ໆລໆ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແນວນີ້ແລ

ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດ ໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ໆລໆ ນີ້ອາສະວະນິໂຣທະຄາມີນີປະຕິປະທາ" ເມື່ອທ່ານຮູ້ເຫັນຢູ່ແນວນີ້ ຈິດຍ່ອມລຸດພົ້ນຈາກກາມາສະຫວະ ພະວາດະວະ ແລະ ອະວິດຊາສະຫວະ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ພາມ ແລະຄະຫະບໍດີທັງຫລາຍ ບຸກຄົນນີ້ຮຽກວ່າ ເປັນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະ ເປັນຜູ້ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເຂົາບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ຈຶ່ງເປັນຜູ້ບໍ່ຫິວ ດັບຮ້ອນ ເຢັນໃຈ ມີຕົນອັນປະເສີດ ສະເຫວີຍສຸກຢູ່ໃນປັດຈຸບັນ"

## ຊາວບ້ານສາລາສະແດງຕົນເປັນອຸປາສົກ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພາມ ແລະຄະຫະບໍດີຊາວບ້ານສາລາໄດ້ຂາບທູນ ວ່າ

"ຂ້າແດ່ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫລົງທາງ ຫຼືເຍືອງໄຟໃນບ່ອນມືດ ດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງທັງຫລາຍນີ້ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງທັງຫລາຍວ່າເປັນອຸປາສົກ ຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" ດັ່ງນີ້ແລ

**ອະປັນນະກະສູດທີ ໑໐ ຈົບ**

**ຄະຫະປະຕິວັກທີ່ ໑ ຈົບບໍລິບູນ**

### ລວມພຣະສູດທີ່ ມີໃນວັກນີ້ ຄື



# ໒. ພິກຂຸວັກ

## ໝວດວ່າດ້ວຍພິກຂຸ

## ໑. ຈູລະຣາຫຸໂລວາທະສູດ

### ວ່າດ້ວຍການປະທານໂອວາດແກ່ພຣະຣາຫຸນ ສູດນ້ອຍ

[໑໐໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະ ຄື ສະໄໝນັ້ນແລ ທ່ານພຣະຣາຫຸນພັກຢູ່ທີ່ຜາສາດຊື່ອັມພລັດຖິກາ ເມື່ອເວລາແລງ ພຣະຜູ້ມີພຣະພາກເຈົ້າຊົງອອກຈາກທີ່ຫຼີບຫຼີກ ແລ້ວສະເດັດເຂົ້າໄປຫາທ່ານ ພຣະຣາຫຸນຈົນເຖິງຜາສາດຊື່ອັມພລັດຖິກາ ທ່ານພຣະຣາຫຸນໄດ້ເຫັນພຣະຜູ້ມີພຣະພາກເຈົ້າສະເດັດ ມາແຕ່ໄກ ຈຶ່ງປູລາດອາສະນະ ແລະຕັ້ງນໍ້າສໍາລັບລ້າງພຣະບາດໄວ້ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວຊົງລ້າງພຣະບາດ ທ່ານພຣະຣາຫຸນຖວາຍອະພິວາດພຣະຜູ້ມີພຣະພາກແລ້ວຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ

[໑໐໘] ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງເຫຼືອນໍ້ານ້ອຍໜຶ່ງໄວ້ໃນພາຊະນະນໍ້າ ແລ້ວຮັບສັ່ງຮຽກທ່ານພຣະຣາຫຸນມາຕັດວ່າ “ຣາຫຸນ ທ່ານເຫັນນໍ້າທີ່ເຫຼືອຢູ່ນ້ອຍໜຶ່ງໃນພາຊະນະນີ້ບໍ?”

ທ່ານພຣະຣາຫຸນຂາບທູນວ່າ “ເຫັນ ຂ້ານ້ອຍ”

“ຣາຫຸນ ຄວາມເປັນສະມະນະຂອງບຸກຄົນຜູ້ບໍ່ມີຄວາມລະອາຍໃນການກ່າວຕົວະທັງທີ່ຮູ້ຢູ່ ກໍມີຢູ່ນ້ອຍໜຶ່ງຄືນໍ້າທີ່ເຫຼືອຢູ່ນ້ອຍໜຶ່ງແນວນີ້”

ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຖອກນ້ຳທີ່ເຫຼືອນອຍໜຶ່ງຖິ້ມ ແລ້ວຕັດກັບທ່ານພຣະຣາຫຸນວ່າ "ຣາຫຸນ ທ່ານເຫັນນ້ຳນອຍໜຶ່ງທີ່ເຮົາຖອກຖິ້ມບໍ?"

"ເຫັນ ຂ້ານ້ອຍ"

"ຣາຫຸນ ຄວາມເປັນສະມະນະຂອງບຸກຄົນຜູ້ບໍ່ມີຄວາມລະອາຍໃນການກ່າວຕົວະທັງທີ່ຮູ້ຢູ່ກໍມີຢູ່ນອຍໜຶ່ງຄືນ້ຳທີ່ຖອກຖິ້ມແລ້ວແນວນີ້"

ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຂວ້ຳພາຊະນະນ້ຳນັ້ນ ແລ້ວຕັດກັບທ່ານພຣະຣາຫຸນວ່າ "ຣາຫຸນ ທ່ານເຫັນພາຊະນະນ້ຳທີ່ຂວ້ຳນີ້ບໍ?"

"ເຫັນ ຂ້ານ້ອຍ"

"ຣາຫຸນ ຄວາມເປັນສະມະນະຂອງບຸກຄົນຜູ້ບໍ່ມີຄວາມລະອາຍໃນການກ່າວຕົວະທັງທີ່ຮູ້ຢູ່ກໍຄືພາຊະນະນ້ຳທີ່ຂວ້ຳແລ້ວແນວນີ້"

ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຫງາຍພາຊະນະນ້ຳນັ້ນ ແລ້ວຕັດກັບທ່ານພຣະຣາຫຸນ ວ່າ "ທ່ານເຫັນພາຊະນະນ້ຳອັນວ່າງເປົ່ານີ້ບໍ?"

"ເຫັນ ຂ້ານ້ອຍ"

"ຣາຫຸນ ຄວາມເປັນສະມະນະຂອງບຸກຄົນຜູ້ບໍ່ມີຄວາມລະອາຍໃນການກ່າວຕົວະທັງທີ່ຮູ້ຢູ່ກໍຄືພາຊະນະນ້ຳທີ່ວ່າງເປົ່າແນວນີ້ ປຽບຄືຊ້າງຕົ້ນມີງາງອນງາມ ເປັນຊ້າງຊົງທີ່ມີຊາດກຳເນີດດີ ເຄີຍຜ່ານເສິກສົງຄາມມາແລ້ວ ບຸກບັ່ນສົງຄາມມາແລ້ວ ທຳການງານ ດ້ວຍຕີນໜ້າທັງ ໔ ແດ່ ດ້ວຍຕີນຫລັງທັງ ໔ ແດ່ ດ້ວຍກາຍທ່ອນໜ້າແດ່ ດ້ວຍກາຍທ່ອນຫລັງແດ່ ດ້ວຍຫົວແດ່ ດ້ວຍຫູທັງ ໔ ແດ່ ດ້ວຍງາທັງ ໔ ແດ່ ດ້ວຍຫາງແດ່ ສະຫງວນໄວ້ແຕ່ງວງທໍ່ນັ້ນ ຍ້ອນການທີ່ຊ້າງສະຫງວນງວງໄວ້ນັ້ນ ຄວານຊ້າງມີຄວາມເຫັນ ແນວນີ້ວ່າ "ຊ້າງຕົ້ນ ເຊືອກນີ້ມີງາງອນງາມ ເປັນຊ້າງຊົງທີ່ມີຊາດກຳເນີດດີ ເຄີຍຜ່ານເສິກສົງຄາມມາແລ້ວ ບຸກບັ່ນສົງຄາມມາແລ້ວ ທຳການງານດ້ວຍຕີນໜ້າທັງ ໔ ແດ່ ດ້ວຍຕີນຫລັງທັງ ໔ ແດ່ ດ້ວຍກາຍທ່ອນໜ້າແດ່ ດ້ວຍກາຍທ່ອນຫລັງແດ່ ດ້ວຍຫົວແດ່ ດ້ວຍຫູທັງ ໔ ແດ່ ດ້ວຍງາທັງ ໔ ແດ່ ດ້ວຍຫາງແດ່ ສະຫງວນໄວ້ແຕ່ງວງທໍ່ນັ້ນ ຊື່ວ່າ ຊ້າງຕົ້ນຍັງສະຫຼະບໍ່ໄດ້ແມ່ນຮອດຊີວິດ"

ເມື່ອໃດ ຊ້າງຕົ້ນມີງາງອນງາມ ເປັນຊ້າງຊົງທີ່ມີຊາດກຳເນີດດີ ເຄີຍຜ່ານເສິກສົງຄາມມາແລ້ວ ບຸກບັ່ນສົງຄາມມາແລ້ວ ທຳການງານດ້ວຍຕີນໜ້າທັງ ໔ ແດ່ ດ້ວຍຕີນຫລັງ ທັງ ໔ ແດ່ ຯລຯ ດ້ວຍຫາງແດ່ ດ້ວຍງວງແດ່ ຍ້ອນການທີ່ຊ້າງທຳການງານດ້ວຍງວງນັ້ນ ເມື່ອນັ້ນຄວານຊ້າງຈຶ່ງມີຄວາມເຫັນແນວນີ້ວ່າ "ຊ້າງຕົ້ນເຊືອກນີ້ ມີງາງອນງາມ ເປັນຊ້າງຊົງ ທີ່ມີຊາດ

ກຳເນີດດີ ເຄີຍຜ່ານເສິກສົງຄາມມາແລ້ວ ບຸກບັ່ນສົງຄາມມາແລ້ວ ທຳການງານດ້ວຍຕີນໜ້າທັງ ໒ ແດ່ ດ້ວຍຕີນຫລັງທັງ ໒ ແດ່ ດ້ວຍກາຍທ່ອນໜ້າແດ່ ດ້ວຍກາຍທ່ອນ ຫລັງແດ່ ດ້ວຍຫົວແດ່ ດ້ວຍຫູທັງ ໒ ແດ່ ດ້ວຍງາທັງ ໒ ແດ່ ດ້ວຍຫາງແດ່ ດ້ວຍງວງແດ່ ຊື່ວ່າຊ້າງຕົ້ນສະລະໄດ້ແມ່ນວ່າຊີວິດ" ບັດນີ້ "ບໍ່ມີອັນໃດທີ່ຊ້າງຕົ້ນຈະເຮັດບໍ່ໄດ້" ແມ່ນສັນໃດ ຕະຖາຄົດກໍສັນນັ້ນຄືກັນບໍ່ກ່າວວ່າ "ບຸກຄົນຜູ້ບໍ່ມີຄວາມລະອາຍໃນການກ່າວຕົວະ ທັງທີ່ຮູ້ຢູ່ ຈະບໍ່ເຮັດບາບກຳຢ່າງອື່ນອີກ"

ຣາຫຸນ ຍ້ອນເຫດນັ້ນ ທ່ານເພິ່ງຕັ້ງໃຈຮູ້ໃນເລື້ອງນີ້ແນວນີ້ວ່າ "ເຮົາຈັກບໍ່ກ່າວຕົວະແມ່ນເພື່ອໃຫ້ຫົວຂວັນກັນຫລິ້ນ" ທ່ານເພິ່ງສຳນຶກຢູ່ຢ່າງນີ້ແລ ຣາຫຸນ"

## ຊົງສອນໃຫ້ພິຈາລະນາກາຍຍະກຳ

[໑໐໗] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ຣາຫຸນ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດແວ່ນມີປະໂຫຍດແນວໃດ?"

ທ່ານພຣະຣາຫຸນທູນຕອບວ່າ "ມີປະໂຫຍດສຳລັບແຍງເບິ່ງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ແນວນັ້ນຄືກັນ ຣາຫຸນ ບຸກຄົນຄວນພິຈາລະນາໃຫ້ດີແລ້ວຈຶ່ງເຮັດກຳທາງກາຍ ພິຈາລະນາໃຫ້ດີແລ້ວຈຶ່ງເຮັດກຳທາງວາຈາ ພິຈາລະນາໃຫ້ດີແລ້ວຈຶ່ງເຮັດກຳທາງໃຈ

ຖ້າທ່ານປາຖະໜາຈະເຮັດກຳໃດທາງກາຍ ທ່ານເພິ່ງພິຈາລະນາກາຍຍະກຳນັ້ນເສຍກ່ອນວ່າ "ກາຍຍະກຳທີ່ເຮົາປາຖະໜາຈະເຮັດນີ້ ເປັນໄປເພື່ອບຽດບຽນຕົນເອງແດ່ ເພື່ອບຽດບຽນຜູ້ອື່ນແດ່ ເພື່ອບຽດບຽນທັງ ໒ ຝ່າຍແດ່ ກາຍຍະກຳນີ້ເປັນອະກຸສົນ ມີທຸກ ເປັນກຳໄລ ມີທຸກເປັນວິບາກ ແມ່ນບໍ?"

ຖ້າທ່ານພິຈາລະນາຢູ່ເພິ່ງຮູ້ແນວນີ້ວ່າ "ກາຍຍະກຳທີ່ເຮົາປາຖະໜາຈະເຮັດນີ້ ເປັນໄປເພື່ອບຽດບຽນຕົນເອງແດ່ ເພື່ອບຽດບຽນຜູ້ອື່ນແດ່ ເພື່ອບຽດບຽນທັງ ໒ ຝ່າຍແດ່ ກາຍຍະກຳນີ້ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ" ກຳທາງກາຍເຫັນຢູ່ແນວນັ້ນ ທ່ານຢ່າເຮັດເດັດຂາດ

ແຕ່ຖ້າທ່ານພິຈາລະນາຢູ່ເພິ່ງຮູ້ແນວນີ້ວ່າ "ກາຍຍະກຳທີ່ເຮົາປາຖະໜາຈະເຮັດນີ້ບໍ່ເປັນໄປເພື່ອບຽດບຽນຕົນເອງແດ່ ບໍ່ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ບໍ່ເປັນໄປເພື່ອບຽດບຽນທັງ ໒ ຝ່າຍແດ່ ກາຍຍະກຳນີ້ເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ" ກຳທາງກາຍເຫັນຢູ່ແນວນີ້ທ່ານຄວນເຮັດ

ຣາຫຸນ ທ່ານແມ່ນເມື່ອກຳລັງເຮັດກຳທາງກາຍ ກໍເພິ່ງພິຈາລະນາກາຍຍະກຳນັ້ນວ່າ "ກາຍຍະກຳທີ່ເຮົາຈະເຮັດນີ້ ເປັນໄປເພື່ອບຽດບຽນຕົນເອງແດ່ ເປັນໄປເພື່ອບຽດບຽນ ຜູ້ອື່ນແດ່ ເປັນໄປເພື່ອບຽດບຽນທັງ ໘ ຝ່າຍແດ່ ກາຍຍະກຳນີ້ເປັນອະກຸສົນ ມີທຸກເປັນ ກຳໄລ ມີທຸກເປັນ ວິບາກ ແມ່ນບໍ?"

ຖ້າທ່ານພິຈາລະນາຢູ່ເພິ່ງຮູ້ແນວນີ້ວ່າ "ກາຍຍະກຳທີ່ເຮົາຈະເຮັດນີ້ ເປັນໄປເພື່ອບຽດບຽນ ຕົນເອງແດ່ ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ເປັນໄປເພື່ອບຽດບຽນທັງ ໘ ຝ່າຍແດ່ ກາຍຍະກຳນີ້ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ" ທ່ານເພິ່ງລະກາຍຍະກຳເຫັນຢູ່ແນວນັ້ນເສຍ

ແຕ່ຖ້າທ່ານພິຈາລະນາຢູ່ເພິ່ງຮູ້ແນວນີ້ວ່າ "ກາຍຍະກຳທີ່ເຮົາຈະເຮັດນີ້ ບໍ່ເປັນໄປເພື່ອບຽດບຽນຕົນເອງແດ່ ບໍ່ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ບໍ່ເປັນໄປເພື່ອບຽດບຽນ ທັງ ໘ ຝ່າຍແດ່ ກາຍຍະກຳນີ້ເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ" ທ່ານເພິ່ງເພີ່ມພູນກາຍຍະກຳເຫັນຢູ່ແນວນັ້ນໃຫ້ຫຼາຍຂຶ້ນ

ຣາຫຸນ ແມ່ນທ່ານເຮັດກຳທາງກາຍແລ້ວ ກໍເພິ່ງພິຈາລະນາກາຍຍະກຳນັ້ນແລວ່າ "ກາຍຍະກຳທີ່ເຮົາເຮັດແລ້ວນີ້ ເປັນໄປເພື່ອບຽດບຽນຕົນເອງແດ່ ເປັນໄປເພື່ອບຽດບຽນ ຜູ້ອື່ນແດ່ ເປັນໄປເພື່ອບຽດບຽນທັງ ໘ ຝ່າຍແດ່ ກາຍຍະກຳນີ້ເປັນອະກຸສົນ ມີທຸກເປັນ ກຳໄລ ມີທຸກເປັນວິບາກແມ່ນບໍ?"

ຖ້າທ່ານພິຈາລະນາຢູ່ເພິ່ງຮູ້ແນວນີ້ວ່າ "ກາຍຍະກຳທີ່ເຮົາເຮັດແລ້ວນີ້ ເປັນໄປເພື່ອບຽດບຽນ ຕົນເອງແດ່ ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ເປັນໄປເພື່ອບຽດບຽນທັງ ໘ ຝ່າຍແດ່ ກາຍຍະກຳນີ້ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ" ກາຍຍະກຳເຫັນຢູ່ແນວນັ້ນ ທ່ານເພິ່ງສະ ແດງ ເປີດເຜີຍ ເຮັດໃຫ້ງ່າຍ ໃນສາດສະດາ ຫຼື ໃນເພື່ອນພົມມະຈາຣີຜູ້ຮູ້ທັງຫລາຍ ແລ້ວສັງລວມຕໍ່ໄປ

ແຕ່ຖ້າທ່ານພິຈາລະນາຢູ່ເພິ່ງຮູ້ແນວນີ້ວ່າ "ກາຍຍະກຳທີ່ເຮົາເຮັດແລ້ວນີ້ ບໍ່ເປັນໄປເພື່ອບຽດບຽນຕົນເອງແດ່ ບໍ່ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ບໍ່ເປັນໄປເພື່ອບຽດບຽນ ທັງ ໘ ຝ່າຍແດ່ ກາຍຍະກຳນີ້ເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ" ທ່ານເພິ່ງມີປີຕິ ແລະປາໂມດຕັ້ງໃຈຮູ້ໃນກຸສົນທຳທັງຫລາຍ ທັງກາງເວັນແລະກາງຄືນ ຢູ່ດ້ວຍກາຍຍະກຳນັ້ນແລ

## ຊົງສອນໃຫ້ພິຈາລະນາວະຈີກຳ

[໑໑໐] ຣາຫຸນ ຖ້າທ່ານປາຖະໜາຈະເຮັດກຳໃດທາງວາຈາ ທ່ານເພິ່ງພິຈາລະນາ ວະຈີ

ກຳນັ້ນເສຍກ່ອນວ່າ "ວະຈີກຳທີ່ເຮົາປາຖະໜາຈະເຮັດນີ້ ເປັນໄປເພື່ອບຽດບຽນຕົນເອງແດ່ ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ເປັນໄປເພື່ອບຽດບຽນທັງ ໔ ຝ່າຍແດ່ ວະຈີກຳນີ້ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ແມ່ນບໍ?"

ຖ້າທ່ານພິຈາລະນາຢູ່ເພິ່ງຮູ້ແນວນີ້ວ່າ "ວະຈີກຳທີ່ເຮົາປາຖະໜາຈະເຮັດນີ້ ເປັນໄປເພື່ອບຽດບຽນຕົນເອງແດ່ ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ເປັນໄປເພື່ອບຽດບຽນ ທັງ ໔ ຝ່າຍແດ່ ວະຈີກຳນີ້ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ" ກຳທາງວາຈາເຫັນຢູ່ແນວນັ້ນ ທ່ານຢ່າເຮັດເດັດຂາດ

ແຕ່ຖ້າທ່ານພິຈາລະນາຢູ່ເພິ່ງຮູ້ແນວນີ້ວ່າ "ວະຈີກຳທີ່ເຮົາປາຖະໜາຈະເຮັດນີ້ ບໍ່ເປັນໄປເພື່ອບຽດບຽນຕົນເອງແດ່ ບໍ່ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ບໍ່ເປັນໄປເພື່ອບຽດບຽນ ທັງ ໔ ຝ່າຍແດ່ ວະຈີກຳນີ້ເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ" ກຳທາງວາຈາເຫັນຢູ່ແນວນັ້ນທ່ານຄວນເຮັດ

ຣາຫຸນ ທ່ານແມ່ນເມື່ອກຳລັງເຮັດກຳທາງວາຈາ ກໍເພິ່ງພິຈາລະນາວະຈີກຳນັ້ນວ່າ "ວະຈີກຳທີ່ເຮົາຈະເຮັດນີ້ ເປັນໄປເພື່ອບຽດບຽນຕົນເອງແດ່ ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ເປັນໄປເພື່ອບຽດບຽນທັງ ໔ ຝ່າຍແດ່ ວະຈີກຳນີ້ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ແມ່ນບໍ?"

ຖ້າທ່ານພິຈາລະນາຢູ່ເພິ່ງຮູ້ແນວນີ້ວ່າ ວະຈີກຳທີ່ເຮົາຈະເຮັດນີ້ ເປັນໄປເພື່ອບຽດບຽນຕົນເອງແດ່ ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ເປັນໄປເພື່ອບຽດບຽນທັງ ໔ ຝ່າຍແດ່ ວະຈີກຳນີ້ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ" ທ່ານເພິ່ງລະວະຈີກຳເຫັນຢູ່ແນວນັ້ນເສຍ

ແຕ່ຖ້າທ່ານພິຈາລະນາຢູ່ເພິ່ງຮູ້ແນວນີ້ວ່າ "ວະຈີກຳທີ່ເຮົາຈະເຮັດນີ້ ບໍ່ເປັນໄປເພື່ອບຽດບຽນ ຕົນເອງແດ່ ບໍ່ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ບໍ່ເປັນໄປເພື່ອບຽດບຽນທັງ ໔ ຝ່າຍແດ່ ວະຈີກຳນີ້ເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ" ທ່ານເພິ່ງເພີ່ມພູນວະຈີກຳເຫັນຢູ່ແນວນັ້ນໃຫ້ຍິ່ງ ໆ ຂຶ້ນໄປ

ຣາຫຸນ ແມ່ນທ່ານເຮັດກຳທາງວາຈາແລ້ວ ກໍເພິ່ງພິຈາລະນາວະຈີກຳນັ້ນແລວ່າ "ວະຈີກຳ ທີ່ເຮົາເຮັດແລ້ວນີ້ ເປັນໄປເພື່ອບຽດບຽນຕົນເອງແດ່ ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ເປັນໄປເພື່ອບຽດບຽນທັງ ໔ ຝ່າຍແດ່ ວະຈີກຳນີ້ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ແມ່ນບໍ?"

ຖ້າທ່ານພິຈາລະນາຢູ່ເພິ່ງຮູ້ແນວນີ້ວ່າ "ວະຈີກຳທີ່ເຮົາເຮັດແລ້ວນີ້ ເປັນໄປເພື່ອບຽດບຽນຕົນເອງແດ່ ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ເປັນໄປເພື່ອບຽດບຽນ ທັງ ໔ ຝ່າຍແດ່ ວະຈີ

ກຳນີ້ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ" ວະຈີກຳ ເຫັນຢູ່ແນວນັ້ນ ທ່ານເພິ່ງສະແດງ ເປີດເຜີຍ ເຮັດໃຫ້ງ່າຍ ໃນສາດສະດາ ຫຼືໃນເພື່ອນພົມມະຈາຣີ ຜູ້ຮູ້ທັງຫລາຍ ແລ້ວສັງລວມຕໍ່ໄປ

ແຕ່ຖ້າທ່ານພິຈາລະນາຢູ່ເພິ່ງຮູ້ແນວນີ້ວ່າ "ວະຈີກຳທີ່ເຮົາເຮັດແລ້ວນີ້ ບໍ່ເປັນໄປເພື່ອບຽດບຽນຕົນເອງແດ່ ບໍ່ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ບໍ່ເປັນໄປເພື່ອບຽດບຽນ ທັງ ໘ ຝ່າຍແດ່ ວະຈີກຳນີ້ເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ" ທ່ານເພິ່ງມີປີຕິ ແລະປາໂມດ ຕັ້ງໃຈຮູ້ໃນກຸສົນທຳທັງຫລາຍ ທັງກາງເວັນແລະກາງຄືນ ຢູ່ດ້ວຍວະຈີກຳນັ້ນແລ

## ຊົງສອນໃຫ້ພິຈາລະນາມະໂນກຳ

[໑໑໑] ຣາຫຸນ ຖ້າທ່ານປາຖະໜາຈະເຮັດກຳໃດທາງໃຈ ທ່ານເພິ່ງພິຈາລະນາມະໂນກຳນັ້ນເສຍກ່ອນວ່າ "ມະໂນກຳທີ່ເຮົາປາຖະໜາຈະເຮັດນີ້ ເປັນໄປເພື່ອບຽດບຽນຕົນເອງແດ່ ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ເປັນໄປເພື່ອບຽດບຽນທັງ ໘ ຝ່າຍແດ່ ມະໂນກຳນີ້ ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ແມ່ນບໍ?"

ຖ້າທ່ານພິຈາລະນາຢູ່ເພິ່ງຮູ້ແນວນີ້ວ່າ "ມະໂນກຳທີ່ເຮົາປາຖະໜາຈະເຮັດນີ້ ເປັນໄປເພື່ອບຽດບຽນຕົນເອງແດ່ ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ເປັນໄປເພື່ອບຽດບຽນ ທັງ ໘ ຝ່າຍແດ່ ມະໂນກຳນີ້ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ" ກຳທາງໃຈ ເຫັນຢູ່ແນວນັ້ນ ທ່ານຢ່າເຮັດເດັດຂາດ

ແຕ່ຖ້າທ່ານພິຈາລະນາຢູ່ເພິ່ງຮູ້ແນວນີ້ວ່າ "ມະໂນກຳທີ່ເຮົາປາຖະໜາຈະເຮັດນີ້ ບໍ່ເປັນໄປເພື່ອບຽດບຽນຕົນເອງແດ່ ບໍ່ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ບໍ່ເປັນໄປເພື່ອບຽດບຽນທັງ ໘ ຝ່າຍແດ່ ມະໂນກຳນີ້ເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ" ກຳທາງໃຈເຫັນຢູ່ແນວນັ້ນ ທ່ານຄວນເຮັດ

ຣາຫຸນ ທ່ານແມ່ນເມື່ອກຳລັງເຮັດກຳທາງໃຈ ກໍເພິ່ງພິຈາລະນາມະໂນກຳນັ້ນແລວ່າ "ມະໂນກຳທີ່ເຮົາຈະເຮັດນີ້ ເປັນໄປເພື່ອບຽດບຽນຕົນເອງແດ່ ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ເປັນໄປເພື່ອບຽດບຽນທັງ ໘ ຝ່າຍແດ່ ມະໂນກຳນີ້ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ແມ່ນບໍ?"

ຖ້າທ່ານພິຈາລະນາຢູ່ເພິ່ງຮູ້ແນວນີ້ວ່າ "ມະໂນກຳທີ່ເຮົາຈະເຮັດນີ້ ເປັນໄປເພື່ອບຽດບຽນຕົນເອງແດ່ ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ເປັນໄປເພື່ອບຽດບຽນທັງ ໘ ຝ່າຍແດ່ ມະໂນກຳນີ້ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ" ທ່ານເພິ່ງລະມະໂນກຳເຫັນຢູ່ແນວນັ້ນ

ແຕ່ຖ້າທ່ານພິຈາລະນາຢູ່ເພິ່ງຮູ້ແນວນີ້ວ່າ "ມະໂນກຳທີ່ເຮົາຈະເຮັດນີ້ ບໍ່ເປັນໄປເພື່ອບຽດບຽນຕົນເອງແດ່ ບໍ່ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ບໍ່ເປັນໄປເພື່ອບຽດບຽນ ທັງ ໘ ຝ່າຍແດ່ ມະໂນກຳນີ້ເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ" ທ່ານເພິ່ງເພີ່ມພູນມະໂນກຳເຫັນຢູ່ແນວນັ້ນ

ຣາຫຸນ ແມ່ນທ່ານເຮັດກຳທາງໃຈແລ້ວ ກໍເພິ່ງພິຈາລະນາມະໂນກຳນັ້ນແລວ່າ "ມະໂນກຳທີ່ເຮົາເຮັດແລ້ວນີ້ ເປັນໄປເພື່ອບຽດບຽນຕົນເອງແດ່ ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ເປັນໄປເພື່ອບຽດບຽນທັງ ໘ ຝ່າຍແດ່ ມະໂນກຳນີ້ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກແມ່ນບໍ?"

ຖ້າທ່ານພິຈາລະນາຢູ່ເພິ່ງຮູ້ແນວນີ້ວ່າ "ມະໂນກຳທີ່ເຮົາເຮັດແລ້ວນີ້ ເປັນໄປເພື່ອບຽດບຽນ ຕົນເອງແດ່ ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ເປັນໄປເພື່ອບຽດບຽນທັງ ໘ ຝ່າຍແດ່ ມະໂນກຳນີ້ເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ" ທ່ານເພິ່ງອຶດອັດ ຣະອາ ລັງກຽດມະໂນກຳເຫັນຢູ່ແນວນັ້ນ ແລ້ວສັງລວມຕໍ່ໄປ

ແຕ່ຖ້າທ່ານພິຈາລະນາຢູ່ເພິ່ງຮູ້ແນວນີ້ວ່າ "ມະໂນກຳທີ່ເຮົາເຮັດແລ້ວນີ້ ບໍ່ເປັນໄປເພື່ອບຽດບຽນຕົນເອງແດ່ ບໍ່ເປັນໄປເພື່ອບຽດບຽນຜູ້ອື່ນແດ່ ບໍ່ເປັນໄປເພື່ອບຽດບຽນ ທັງ ໘ ຝ່າຍແດ່ ມະໂນກຳນີ້ເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ" ທ່ານເພິ່ງມີປີຕິ ແລະ ປາໂມດ ຕັ້ງໃຈຮູ້ໃນກຸສົນທຳທັງຫລາຍ ທັງກາງເວັນແລະກາງຄືນ ຢູ່ດ້ວຍ ມະໂນກຳນັ້ນແລ

[໑໑໘] ຣາຫຸນ ສະມະໜະຫຼືພາມ໑ ເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການ ໄດ້ຊຳຣະກາຍຍະກຳ ວະຈີກຳ ແລະມະໂນກຳແລ້ວ ສະມະໜະຫຼືພາມເຫຼົ່ານັ້ນທັງໝົດພິຈາລະນາດີແລ້ວຈຶ່ງໄດ້ຊຳຣະກາຍຍະກຳ ພິຈາລະນາດີແລ້ວຈຶ່ງໄດ້ຊຳຣະວະຈີກຳ ພິຈາລະນາດີແລ້ວຈຶ່ງໄດ້ຊຳຣະມະໂນກຳແນວນີ້ແລ

ແມ່ນສະມະໜະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການ ຈັກຊຳຣະກາຍຍະກຳ ວະຈີກຳ ແລະ ມະໂນກຳ ສະມະໜະຫຼືພາມເຫຼົ່ານັ້ນທັງໝົດ ກໍພິຈາລະນາດີແລ້ວຈັກຊຳຣະກາຍຍະກຳ ພິຈາລະນາດີແລ້ວຈັກຊຳຣະວະຈີກຳ ພິຈາລະນາດີແລ້ວຈັກຊຳຣະມະໂນກຳແນວນີ້ແລ

ເຖິງສະມະນະພາມເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການກຳລັງ ຊຳຣະກາຍຍະກຳ ວະຈີກຳ ແລະມະໂນກຳຢູ່ ສະມະໜະຫຼືພາມເຫຼົ່ານັ້ນທັງໝົດ ກໍພິຈາລະນາດີແລ້ວຈຶ່ງຊຳຣະກາຍຍະກຳ ພິຈາລະນາດີແລ້ວຈຶ່ງຊຳຣະວະຈີກຳ ພິຈາລະນາດີແລ້ວຈຶ່ງຊຳຣະມະໂນກຳ ແນວນີ້ແລ

ຣາຫຸນ ຍ້ອນເຫດນັ້ນແລ ທ່ານເພິ່ງຕັ້ງໃຈຮູ້ໃນເລື້ອງນີ້ແນວນີ້ວ່າ "ເຮົາພິຈາລະນາດີ

ແລ້ວຈັກຊໍາຣະກາຍຍະກໍາ ພິຈາລະນາດີແລ້ວຈັກຊໍາຣະວະຈີກໍາ ພິຈາລະນາດີແລ້ວຈັກຊໍາຣະມະໂນກໍາ" ທ່ານເພິ່ງຕັ້ງໃຈຮູ້ແນວນີ້ແລ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະຣາຫຸນມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ຈູລະຣາຫຸໂລວາທະສູດທີ ໑ ຈົບ**

# ໘. ມະຫາຣາຫຸໂລວາທະສູດ

## ວ່າດ້ວຍການປະທານໂອວາດແກ່ພຣະຣາຫຸນ ສູດໃຫຍ່

[໑໑໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກຖືບາດແລະຈີວອນ ສະເດັດເຂົ້າໄປບິນທະບາດໃນກຣຸງສາວັດຖີ ແມ່ນທ່ານພຣະຣາຫຸນກໍຄອງອັນຕະຣະວາສົກຖືບາດແລະຈີວອນ ຕາມສະເດັດພຣະຜູ້ມີພຣະພາກເຈົ້າໄປທາງເບື້ອງພຣະປຣິດສະດາງ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງອວ່າຍໜ້າໄປຮັບສັ່ງກັບທ່ານພຣະຣາຫຸນ ວ່າ

"ຣາຫຸນ ທ່ານເພິ່ງເຫັນຮູບແນວໃດແນວໜຶ່ງ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ຢູ່ໄກຫຼືໃກ້ກໍຕາມ ແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ"

ທ່ານພຣະຣາຫຸນທູນຖາມວ່າ "ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຮູບທໍ່ນັ້ນຫຼື? ຂ້າແດ່ ພຣະສຸຄົດ ຮູບທໍ່ນັ້ນແມ່ນບໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ຣາຫຸນ ທັງຮູບ ທັງເວທະນາ ທັງສັນຍາ ທັງສັງຂານ ທັງວິນຍານ"

ຫລັງຈາກນັ້ນ ທ່ານພຣະຣາຫຸນຄິດວ່າ "ມື້ນີ້ ໃຜນໍ? ທີ່ພຣະຜູ້ມີພຣະພາກເຈົ້າຈະຊົງປະທານໂອວາດໂຜດສະເພາະພຣະພັກ ແລ້ວເຂົ້າເຮືອນເພື່ອບິນທະບາດ" ກັບຈາກທີ່ນັ້ນແລ້ວນັ່ງຄູ້

ບັນລັງ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ນະ ເຫງົ້າໄມ້ແຫ່ງໜຶ່ງ ທ່ານພຣະ ສາຣີບຸດໄດ້ເຫັນທ່ານພຣະຣາຫຸນນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າໃຕ້ເຫງົ້າໄມ້ແຫ່ງໜຶ່ງ ຈຶ່ງກ່າວກັບທ່ານພຣະຣາຫຸນ ວ່າ

"ຣາຫຸນ ທ່ານຈົ່ງຈະເລີນອານາປານະສະຕິພາວະນາເທີ້ນ ຍ້ອນອານາປານະສະຕິພາວະນາທີ່ບຸກຄົນຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ"

## ທາດ ໕

[໑໑໔] ເມື່ອເວລາແລງ ທ່ານພຣະຣາຫຸນອອກຈາກທີ່ຫຼີບຫຼີກ ແລ້ວເຂົ້າໄປເຝົ້າພຣະ ຜູ້ມີພຣະພາກຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ອານາປານະສະຕິທີ່ບຸກຄົນຈະເລີນແລ້ວແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ຣາຫຸນ ຮູບຊະນິດໃດຊະນິດໜຶ່ງເຊິ່ງເປັນອຸປາທິນນະກະຣູບ ທີ່ເປັນພາຍໃນ ເປັນຂອງສະເພາະຕົນ ເປັນຂອງແຂ້ນແຂງ ເປັນຂອງຫຍາບ ຄື ຜົມ ຂົນ ເລັບ ແຂ້ວ ໜັງ ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໄຕ ຫົວໃຈ ຕັບ ພັງຜືດ ມ້າມ ປອດ ໄສ້ໃຫຍ່ ໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ ຫຼື ຮູບຊະນິດໃດຊະນິດໜຶ່ງເຊິ່ງເປັນອຸປາທິນນະກະຣູບທີ່ເປັນ ພາຍໃນ ເປັນຂອງສະເພາະຕົນ ເປັນຂອງແຂ້ນແຂງ ເປັນຂອງຫຍາບ ນີ້ຮຽກວ່າ ປະຖະວີທາດທີ່ເປັນພາຍໃນ

ປະຖະວີທາດ (ທາດດິນ) ທີ່ເປັນພາຍໃນ ແລະ ປະຖະວີທາດທີ່ເປັນພາຍນອກ ກໍເປັນປະຖະວີທາດ ນັ່ງເອງ ບັນດິດຄວນເຫັນປະຖະວີທາດນັ້ນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ເມື່ອເຫັນປະຖະວີທາດນັ້ນ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ແລ້ວ ຍ່ອມເບື່ອໜ່າຍໃນປະຖະວີທາດ ແລະເຮັດຈິດໃຫ້ຄາຍກຳໜັດໃນປະຖະວີທາດໄດ້

[໑໑໕] ອາໂປທາດ ເປັນແນວໃດ?

ຄື ອາໂປທາດທີ່ເປັນພາຍໃນກໍມີ ອາໂປທາດທີ່ເປັນພາຍນອກກໍມີ

ອາໂປທາດທີ່ເປັນພາຍໃນ ເປັນແນວໃດ?

ຄື ອຸປາທິນນະກະຣູບທີ່ເປັນພາຍໃນ ເປັນຂອງສະເພາະຕົນ ເປັນຂອງເອີບອາບ ມີຄວາມເອີບອາບ ຄື ດີ ສະເລດ ໜອງ ເລືອດ ເຫື່ອ ມັນ ຂຸ້ນ ນ້ຳຕາ ນ້ຳມັນ ນ້ຳລາຍ ນ້ຳມູກ

ໄຂຂໍ້ ມູດ ຫຼືຮູບຊະນິດໃດຊະນິດໜຶ່ງທີ່ເປັນອຸປາທິນນະກະຮູບທີ່ເປັນພາຍໃນ ເປັນຂອງສະເພາະຕົນ ເປັນຂອງເອີບອາບ ມີຄວາມເອີບອາບ ນີ້ຮຽກວ່າ ອາໂປທາດທີ່ເປັນພາຍໃນ

ອາໂປທາດ (ທາດນ້ຳ) ທີ່ເປັນພາຍໃນແລະອາໂປທາດທີ່ເປັນພາຍນອກ ກໍເປັນອາໂປທາດນັ້ນເອງ ບັນດິດເພິ່ງເຫັນອາໂປທາດນັ້ນ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແບບນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ເມື່ອເຫັນອາໂປທາດນັ້ນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແບບນີ້ແລ້ວ ຍ່ອມເບື່ອໜ່າຍໃນອາໂປທາດແລະເຮັດຈິດໃຫ້ຄາຍກຳໜັດໃນອາໂປທາດໄດ້

[໑໑໖] ເຕໂຊທາດ ເປັນແບບໃດ?

ຄື ເຕໂຊທາດທີ່ເປັນພາຍໃນກໍມີ ເຕໂຊທາດທີ່ເປັນພາຍນອກກໍມີ

ເຕໂຊທາດທີ່ເປັນພາຍໃນ ເປັນແບບໃດ?

ຄື ອຸປາທິນນະກະຮູບທີ່ເປັນພາຍໃນ ເປັນຂອງສະເພາະຕົນ ເປັນຂອງຮ້ອນຮົນມີຄວາມຮ້ອນຮົນ ໄດ້ແກ່ ທຳມະຊາດທີ່ເປັນເຄື່ອງເຮັດຮ່າງກາຍໃຫ້ອົບອຸ່ນ ທຳມະຊາດທີ່ເປັນເຄື່ອງເຮັດຮ່າງກາຍໃຫ້ຊຸດໂຊມ ທຳມະຊາດທີ່ເປັນເຄື່ອງເຮັດຮ່າງກາຍໃຫ້ຮ້ອນຮົນ ທຳມະຊາດທີ່ເປັນເຄື່ອງຍ່ອຍສິ່ງທີ່ກິນແລ້ວ ດື່ມແລ້ວ ຫຍ້ຳແລ້ວ ແລະ ຊີມຣົດແລ້ວ ຫຼື ຮູບຊະນິດໃດຊະນິດໜຶ່ງທີ່ເປັນອຸປາທິນນະກະຮູບເຊິ່ງເປັນພາຍໃນເປັນຂອງສະເພາະຕົນ ເປັນຂອງຮ້ອນຮົນ ມີຄວາມຮ້ອນຮົນ ນີ້ຮຽກວ່າ ເຕໂຊທາດທີ່ເປັນພາຍໃນ

ເຕໂຊທາດ (ທາດໄຟ) ທີ່ເປັນພາຍໃນແລະເຕໂຊທາດທີ່ເປັນພາຍນອກ ກໍເປັນເຕໂຊທາດນັ້ນເອງ ບັນດິດເພິ່ງເຫັນເຕໂຊທາດນັ້ນ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແບບນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ເມື່ອເຫັນເຕໂຊທາດນັ້ນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແບບນີ້ແລ້ວ ຍ່ອມເບື່ອໜ່າຍໃນເຕໂຊທາດ ແລະເຮັດຈິດໃຫ້ຄາຍກຳໜັດໃນເຕໂຊທາດໄດ້

[໑໑໗] ວາໂຍທາດ ເປັນແບບໃດ?

ຄື ວາໂຍທາດທີ່ເປັນພາຍໃນກໍມີ ວາໂຍທາດທີ່ເປັນພາຍນອກກໍມີ

ວາໂຍທາດທີ່ເປັນພາຍໃນ ເປັນແບບໃດ?

ຄື ອຸປາທິນນະກະຮູບທີ່ເປັນພາຍໃນ ເປັນຂອງສະເພາະຕົນ ເປັນຂອງພັດໄປມາມີຄວາມພັດໄປມາ ຄື ລົມທີ່ພັດຂຶ້ນເບື້ອງເທິງ ລົມທີ່ພັດລົງເບື້ອງຕ່ຳ ລົມໃນທ້ອງ ລົມໃນລຳໄສ້

ລົມທີ່ແລ່ນໄປຕາມອະໄວຍະວະນ້ອຍໃຫຍ່ ລົມຫັນໃຈເຂົ້າ ລົມຫັນໃຈອອກ ຫຼື ຮູບຊະນິດໃດຊະນິດໜຶ່ງ ເຊິ່ງເປັນພາຍໃນ ເປັນຂອງສະເພາະຕົນ ເປັນຂອງພັດໄປມາ ມີຄວາມພັດໄປມາ ນີ້ຮຽກວ່າ ວາໂຍທາດທີ່ເປັນພາຍໃນ

ວາໂຍທາດ (ທາດລົມ) ທີ່ເປັນພາຍໃນແລະວາໂຍທາດທີ່ເປັນພາຍນອກ ກໍເປັນວາໂຍທາດນັ້ນເອງ ບັນດິດເພິ່ງເຫັນວາໂຍທາດນັ້ນ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ເມື່ອເຫັນວາໂຍທາດນັ້ນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ແລ້ວ ຍ່ອມເບື່ອໜ່າຍໃນວາໂຍທາດ ແລະເຮັດຈິດ ໃຫ້ຄາຍກຳໜັດໃນວາໂຍທາດໄດ້

[໑໑໗] ອາກາດສະທາດເປັນແນວໃດ?

ຄື ອາກາດສະທາດທີ່ເປັນພາຍໃນກໍມີ ອາກາດສະທາດທີ່ເປັນພາຍນອກກໍມີ

ອາກາດສະທາດທີ່ເປັນພາຍໃນ ເປັນແນວໃດ?

ຄື ອຸປາທິນນະກະຮູບທີ່ເປັນພາຍໃນ ເປັນຂອງສະເພາະຕົນ ເປັນຂອງວ່າງເປົ່າ ມີຄວາມວ່າງເປົ່າ ຄື ຮູຫູ ຮູດັງ ຊ່ອງປາກ ຊ່ອງສຳລັບກືນຂອງກິນ ຂອງດື່ມ ຂອງຫຍ້ຳ ຂອງຊີມຣົດ ຊ່ອງທີ່ພັກຢູ່ແຫ່ງຂອງກິນ ຂອງດື່ມ ຂອງຫຍ້ຳ ຂອງຊີມຣົດ ແລະຊ່ອງສຳລັບຂອງກິນຂອງດື່ມ ຂອງຫຍ້ຳ ຂອງຊີມຣົດ ໄຫຼລົງເບື້ອງຕ່ຳ ຫຼືຮູບຊະນິດໃດຊະນິດໜຶ່ງທີ່ເປັນ ອຸປາທິນນະກະຮູບທີ່ເປັນພາຍໃນ ເປັນຂອງສະເພາະຕົນ ເປັນຂອງວ່າງເປົ່າ ມີຄວາມວ່າງເປົ່າ ເປັນຊ່ອງວ່າງ ເປັນທຳມະຊາດທີ່ນັບວ່າຊ່ອງວ່າງ ເຊິ່ງຊີ້ນ ແລະເລືອດບໍ່ຖືກຕ້ອງແລ້ວ ນີ້ຮຽກວ່າອາກາດສະທາດທີ່ເປັນພາຍໃນ

ອາກາດສະທາດ (ທາດຄືອາກາດ) ທີ່ເປັນພາຍໃນແລະອາກາດສະທາດທີ່ເປັນພາຍນອກກໍເປັນອາກາດສະທາດນັ້ນເອງ ບັນດິດເພິ່ງເຫັນອາກາດສະທາດນັ້ນ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ເມື່ອເຫັນ ອາກາດສະທາດນັ້ນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ແລ້ວ ຍ່ອມເບື່ອໜ່າຍໃນອາກາດສະທາດແລະເຮັດຈິດໃຫ້ຄາຍກຳໜັດໃນອາກາດສະທາດໄດ້

## ພາວະນາສະເໝີດ້ວຍທາດ ໕

[໑໑໘] ຣາຫຸນ ທ່ານຈົ່ງຈະເລີນພາວະນາໃຫ້ສະເໝີດ້ວຍແຜ່ນດິນເທີ້ນ ຍ້ອນເມື່ອທ່ານຈະເລີນພາວະນາໃຫ້ສະເໝີດ້ວຍແຜ່ນດິນຢູ່ ຜັດສະອັນເປັນທີ່ພໍໃຈ ແລະ ບໍ່ພໍໃຈທີ່ເກີດຂຶ້ນແລ້ວຈັກຄອບງຳຈິດຂອງທ່ານບໍ່ໄດ້ ຄົນທັງຫລາຍຖິ້ມຂອງສະອາດແດ່ ບໍ່ສະອາດແດ່ ຄູດແດ່ ມູດແດ່

ນ້ຳລາຍແດ່ ນ້ຳໜອງແດ່ ເລືອດແດ່ ລົງເທິງແຜ່ນດິນ ແຜ່ນດິນຈະອຶດອັດ ຣະອາ ຫຼື ລັງກຽດ ຂອງນັ້ນກໍບໍ່ແມ່ນ ແມ່ນສັນໃດ ທ່ານກໍສັນນັ້ນຄືກັນ ຈົ່ງຈະເລີນພາວະນາ ໃຫ້ສະເໝີດ້ວຍ ແຜ່ນດິນ ຍ້ອນເມື່ອທ່ານຈະເລີນພາວະນາໃຫ້ສະເໝີດ້ວຍແຜ່ນດິນຢູ່ ຜັດສະອັນເປັນທີ່ພໍໃຈ ແລະບໍ່ພໍໃຈທີ່ເກີດຂຶ້ນແລ້ວ ຈັກຄອບງຳຈິດຂອງທ່ານບໍ່ໄດ້

ທ່ານຈົ່ງຈະເລີນພາວະນາໃຫ້ສະເໝີດ້ວຍນ້ຳເທີ້ນ ຍ້ອນເມື່ອທ່ານຈະເລີນພາວະນາໃຫ້ ສະເໝີດ້ວຍນ້ຳຢູ່ ຜັດສະອັນເປັນທີ່ພໍໃຈແລະບໍ່ພໍໃຈທີ່ເກີດຂຶ້ນແລ້ວ ຈັກຄອບງຳຈິດຂອງທ່ານບໍ່ ໄດ້ ຄົນທັງຫລາຍລ້າງຂອງສະອາດແດ່ ຂອງບໍ່ສະອາດແດ່ ຄູດແດ່ ມູດແດ່ ນ້ຳລາຍແດ່ ນ້ຳໜ ອງແດ່ ເລືອດແດ່ ນ້ຳຈະອຶດອັດ ຣະອາ ຫຼືລັງກຽດຂອງນັ້ນກໍບໍ່ແມ່ນ ແມ່ນສັນໃດ ທ່ານກໍ ສັນນັ້ນຄືກັນ ຈົ່ງຈະເລີນພາວະນາໃຫ້ສະເໝີດ້ວຍນ້ຳ ຍ້ອນເມື່ອທ່ານ ຈະເລີນພາວະນາໃຫ້ສະເ ໝີດ້ວຍນ້ຳຢູ່ ຜັດສະອັນເປັນທີ່ພໍໃຈແລະບໍ່ພໍໃຈທີ່ເກີດຂຶ້ນແລ້ວ ຈັກຄອບງຳຈິດຂອງທ່ານບໍ່ໄດ້

ທ່ານຈົ່ງຈະເລີນພາວະນາໃຫ້ສະເໝີດ້ວຍໄຟເທີ້ນ ຍ້ອນເມື່ອທ່ານຈະເລີນພາວະນາໃຫ້ ສະເໝີດ້ວຍໄຟຢູ່ ຜັດສະອັນເປັນທີ່ພໍໃຈແລະບໍ່ພໍໃຈທີ່ເກີດຂຶ້ນແລ້ວ ຈັກຄອບງຳຈິດຂອງທ່ານ ບໍ່ ໄດ້ ໄຟຍ່ອມເຜົາຂອງສະອາດແດ່ ຂອງບໍ່ສະອາດແດ່ ຄູດແດ່ ມູດແດ່ ນ້ຳລາຍແດ່ ນ້ຳໜອງແດ່ ເລືອດແດ່ ໄຟຈະອຶດອັດ ຣະອາ ຫຼື ລັງກຽດຂອງນັ້ນກໍບໍ່ແມ່ນ ແມ່ນສັນໃດ ທ່ານກໍສັນນັ້ນຄືກັນ ຈົ່ງຈະເລີນພາວະນາໃຫ້ສະເໝີດ້ວຍໄຟ ຍ້ອນເມື່ອທ່ານຈະເລີນພາວະນາໃຫ້ສະເໝີດ້ວຍໄຟຢູ່ ຜັດ ສະອັນເປັນທີ່ພໍໃຈ ແລະ ບໍ່ພໍໃຈທີ່ເກີດຂຶ້ນແລ້ວ ຈັກຄອບງຳຈິດຂອງທ່ານບໍ່ໄດ້

ທ່ານຈົ່ງຈະເລີນພາວະນາໃຫ້ສະເໝີດ້ວຍລົມເທີ້ນ ຍ້ອນເມື່ອທ່ານຈະເລີນພາວະນາໃຫ້ ສະເໝີດ້ວຍລົມຢູ່ ຜັດສະອັນເປັນທີ່ພໍໃຈແລະບໍ່ພໍໃຈທີ່ເກີດຂຶ້ນແລ້ວ ຈັກຄອບງຳຈິດຂອງທ່ານບໍ່ ໄດ້ ລົມຍ່ອມພັດຂອງສະອາດແດ່ ຂອງບໍ່ສະອາດແດ່ ຄູດແດ່ ມູດແດ່ ນ້ຳລາຍແດ່ ນ້ຳໜອງແດ່ ເລືອດແດ່ ລົມຈະອຶດອັດ ຣະອາ ຫຼືລັງກຽດຂອງນັ້ນກໍບໍ່ແມ່ນ ແມ່ນສັນໃດ ທ່ານກໍສັນນັ້ນຄືກັນ ຈົ່ງຈະເລີນພາວະນາໃຫ້ສະເໝີດ້ວຍລົມ ຍ້ອນເມື່ອທ່ານຈະເລີນພາວະນາໃຫ້ສະເໝີດ້ວຍລົມຢູ່ ຜັດສະອັນເປັນທີ່ພໍໃຈ ແລະ ບໍ່ພໍໃຈທີ່ເກີດຂຶ້ນແລ້ວ ຈັກຄອບງຳຈິດຂອງທ່ານບໍ່ໄດ້

ທ່ານຈົ່ງຈະເລີນພາວະນາໃຫ້ສະເໝີດ້ວຍອາກາດເທີ້ນ ຍ້ອນເມື່ອທ່ານຈະເລີນພາວະນາ ໃຫ້ສະເໝີ ດ້ວຍອາກາດຢູ່ ຜັດສະອັນເປັນທີ່ພໍໃຈແລະບໍ່ພໍໃຈທີ່ເກີດຂຶ້ນແລ້ວ ຈັກຄອບງຳຈິດ ຂອງທ່ານບໍ່ໄດ້ ອາກາດບໍ່ຕັ້ງຢູ່ໃນທີ່ໃດ ໆ ແມ່ນສັນໃດ ທ່ານກໍສັນນັ້ນຄືກັນ ຈົ່ງຈະເລີນພາວະ ນາ ໃຫ້ສະເໝີດ້ວຍອາກາດ ຍ້ອນເມື່ອທ່ານຈະເລີນພາວະນາໃຫ້ສະເໝີດ້ວຍອາກາດຢູ່ ຜັດສະ ອັນເປັນທີ່ພໍໃຈ ແລະ ບໍ່ພໍໃຈທີ່ເກີດຂຶ້ນແລ້ວ ຈັກຄອບງຳຈິດຂອງທ່ານບໍ່ໄດ້

## ການຈະເລີນພາວະນາ ໖ ແນວ

[໑໔໐] ຣາຫຸນ

໑. ທ່ານຈົ່ງຈະເລີນເມດຕາພາວະນາເທີ້ນ ຍ້ອນເມື່ອທ່ານຈະເລີນເມດຕາພາວະນາຢູ່ ຈັກລະພະຍາບາດໄດ້

໒. ທ່ານຈົ່ງຈະເລີນກະລຸນາພາວະນາເທີ້ນ ຍ້ອນເມື່ອທ່ານຈະເລີນກະລຸນາພາວະນາຢູ່ ຈັກລະການບຽດບຽນໄດ້

໓. ທ່ານຈົ່ງຈະເລີນມຸທິຕາພາວະນາເທີ້ນ ຍ້ອນເມື່ອທ່ານຈະເລີນມຸທິຕາພາວະນາຢູ່ ຈັກລະຄວາມຣິດສະຫຍາໄດ້

໔. ທ່ານຈົ່ງຈະເລີນອຸເປກຂາພາວະນາເທີ້ນ ຍ້ອນເມື່ອທ່ານຈະເລີນອຸເປກຂາພາວະນາຢູ່ ຈັກລະຄວາມຫງຸດຫງິດໄດ້

໕. ທ່ານຈົ່ງຈະເລີນອະສຸພະພາວະນາເທີ້ນ ຍ້ອນເມື່ອທ່ານຈະເລີນອະສຸພະພາວະນາຢູ່ ຈັກລະຣາຄະໄດ້

໖. ທ່ານຈົ່ງຈະເລີນອະນິດຈະສັນຍາເທີ້ນ ຍ້ອນເມື່ອທ່ານຈະເລີນອະນິດຈະສັນຍາຢູ່ ຈັກລະຄວາມຖືໂຕໄດ້

## ອານາປານະສະຕິ ໑໖ ຂັ້ນ

[໑໔໑] ຣາຫຸນ ທ່ານຈົ່ງຈະເລີນອານາປານະສະຕິເທີ້ນ ຍ້ອນອານາປານະສະຕິທີ່ບຸກຄົນຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ

ອານາປານະສະຕິທີ່ບຸກຄົນຈະເລີນແລ້ວແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

ຄື ພິກຂຸໃນທຳວິໄນນີ້ ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ນັ່ງຄູ້ ບັນລັງຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ

໑. ເມື່ອຫັນໃຈເຂົ້າຍາວກໍຮູ້ແຈ້ງວ່າ "ເຮົາຫັນໃຈເຂົ້າຍາວ"
ເມື່ອຫັນໃຈອອກຍາວກໍຮູ້ແຈ້ງວ່າ "ເຮົາຫັນໃຈອອກຍາວ"

໒. ເມື່ອຫັນໃຈເຂົ້າສັ້ນກໍຮູ້ແຈ້ງວ່າ "ເຮົາຫັນໃຈເຂົ້າສັ້ນ"
ເມື່ອຫັນໃຈອອກສັ້ນກໍຮູ້ແຈ້ງວ່າ "ເຮົາຫັນໃຈອອກສັ້ນ"

໓. ຕັ້ງໃຈຮູ້ວ່າ "ເຮົາກຳນົດຮູ້ກອງລົມທັງປວງຫັນໃຈເຂົ້າ"
ຕັ້ງໃຈຮູ້ວ່າ "ເຮົາກຳນົດຮູ້ກອງລົມທັງປວງຫັນໃຈອອກ"
໔. ຕັ້ງໃຈຮູ້ວ່າ "ເຮົາລະງັບກາຍສັງຂານຫັນໃຈເຂົ້າ"
ຕັ້ງໃຈຮູ້ວ່າ "ເຮົາລະງັບກາຍສັງຂານຫັນໃຈອອກ"
໕. ຕັ້ງໃຈຮູ້ວ່າ "ເຮົາກຳນົດຮູ້ປີຕິຫັນໃຈເຂົ້າ"
ຕັ້ງໃຈຮູ້ວ່າ "ເຮົາກຳນົດຮູ້ປີຕິຫັນໃຈອອກ"
໖. ຕັ້ງໃຈຮູ້ວ່າ "ເຮົາກຳນົດຮູ້ສຸກຫັນໃຈເຂົ້າ"
ຕັ້ງໃຈຮູ້ວ່າ "ເຮົາກຳນົດຮູ້ສຸກຫັນໃຈອອກ"
໗. ຕັ້ງໃຈຮູ້ວ່າ "ເຮົາກຳນົດຮູ້ຈິດຕະສັງຂານຫັນໃຈເຂົ້າ"
ຕັ້ງໃຈຮູ້ວ່າ "ເຮົາກຳນົດຮູ້ຈິດຕະສັງຂານຫັນໃຈອອກ"
໘. ຕັ້ງໃຈຮູ້ວ່າ "ເຮົາລະງັບຈິດຕະສັງຂານຫັນໃຈເຂົ້າ"
ຕັ້ງໃຈຮູ້ວ່າ "ເຮົາລະງັບຈິດຕະສັງຂານຫັນໃຈອອກ"
໙. ຕັ້ງໃຈຮູ້ວ່າ "ເຮົາກຳນົດຮູ້ຈິດຫັນໃຈເຂົ້າ"
ຕັ້ງໃຈຮູ້ວ່າ "ເຮົາກຳນົດຮູ້ຈິດຫັນໃຈອອກ"
໑໐. ຕັ້ງໃຈຮູ້ວ່າ "ເຮົາເຮັດຈິດໃຫ້ບັນເທີງຫັນໃຈເຂົ້າ"
ຕັ້ງໃຈຮູ້ວ່າ "ເຮົາເຮັດຈິດໃຫ້ບັນເທີງຫັນໃຈອອກ"
໑໑. ຕັ້ງໃຈຮູ້ວ່າ "ເຮົາຕັ້ງຈິດໝັ້ນຫັນໃຈເຂົ້າ"
ຕັ້ງໃຈຮູ້ວ່າ "ເຮົາຕັ້ງຈິດໝັ້ນຫັນໃຈອອກ"
໑໒. ຕັ້ງໃຈຮູ້ວ່າ "ເຮົາປົດຈິດຫັນໃຈເຂົ້າ"
ຕັ້ງໃຈຮູ້ວ່າ "ເຮົາປົດຈິດຫັນໃຈອອກ"
໑໓. ຕັ້ງໃຈຮູ້ວ່າ "ເຮົາພິຈາລະນາເຫັນວ່າບໍ່ທ່ຽງຫັນໃຈເຂົ້າ"
ຕັ້ງໃຈຮູ້ວ່າ "ເຮົາພິຈາລະນາເຫັນວ່າບໍ່ທ່ຽງຫັນໃຈອອກ"
໑໔. ຕັ້ງໃຈຮູ້ວ່າ "ເຮົາພິຈາລະນາເຫັນຄວາມຄາຍອອກໄດ້ຫັນໃຈເຂົ້າ"
ຕັ້ງໃຈຮູ້ວ່າ "ເຮົາພິຈາລະນາເຫັນຄວາມຄາຍອອກໄດ້ຫັນໃຈອອກ"
໑໕. ຕັ້ງໃຈຮູ້ວ່າ "ເຮົາພິຈາລະນາເຫັນຄວາມດັບໄປຫັນໃຈເຂົ້າ"
ຕັ້ງໃຈຮູ້ວ່າ "ເຮົາພິຈາລະນາເຫັນຄວາມດັບໄປຫັນໃຈອອກ"
໑໖. ຕັ້ງໃຈຮູ້ວ່າ "ເຮົາພິຈາລະນາເຫັນຄວາມສະລະຄືນຫັນໃຈເຂົ້າ"
ຕັ້ງໃຈຮູ້ວ່າ "ເຮົາພິຈາລະນາເຫັນຄວາມສະລະຄືນຫັນໃຈອອກ"

ອານາປານະສະຕິທີ່ບຸກຄົນຈະເລີນແລ້ວແນວນີ້ ເຮັດໃຫ້ຫຼາຍແລ້ວແນວນີ້ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ

ຣາຫຸນ ເມື່ອອານາປານະສະຕິອັນບຸກຄົນຈະເລີນແລ້ວແບວນີ້ ເຮັດໃຫ້ຫຼາຍແລ້ວແບວນີ້ ລົມອັດສາສະ (ຫັນໃຈເຂົ້າ) ລົມປັດສາສະ (ຫັນໃຈອອກ) ຄັ້ງສຸດທ້າຍທີ່ຜາກົດຊັດແຈ້ງຍ່ອມດັບໄປ ທີ່ບໍ່ປາກົດຊັດແຈ້ງຍັງບໍ່ດັບໄປ"

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພາສິດນີ້ແລ້ວ ທ່ານພຣະຣາຫຸນມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະຫາຣາຫຸໂລວາທະສູດທີ ໘ ຈົບ**

# ໓. ຈູລະມາລຸງກະຍະສູດ

## ວ່າດ້ວຍພຣະມາລຸງກະຍະບຸດ ສູດນ້ອຍ

## ເຫດແຫ່ງອັບພະຍາກະຕະບັນຫາ ໑໐ ປະການ

[໑໔໘] ຂ້າພະເຈົ້າໄດ້ຟັງມາແບວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ທ່ານພຣະມາລຸງກະຍະບຸດ ຫຼີບຫຼີກຢູ່ໃນທີ່ສະຫງັດ ໄດ້ເກີດຄວາມຄິດຄຳນຶງແບວນີ້ວ່າ

"ທິດຖິທີ່ພຣະຜູ້ມີພຣະພາກເຈົ້າບໍ່ຕັດຕອບ ຊົງງົດ ຊົງວາງເສີຍເຫລົ່ານີ້ ຄື ທິດຖິວ່າ "ໂລກທ່ຽງ ໂລກບໍ່ທ່ຽງ ໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ຊີວະກັບສະຣີຣະເປັນແບວດຽວກັນ ຊີວະກັບສະຣີຣະເປັນຄົນລະແບວກັນ ຫລັງຈາກຕາຍແລ້ວຕະຖາຄົດເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ການທີ່ພຣະຜູ້ມີພຣະພາກເຈົ້າ ບໍ່ຊົງຕອບ ທິດຖິເຫຼົ່ານັ້ນແກ່ເຮົາ ເຮົາບໍ່ພໍໃຈ ເຮົາບໍ່ພໍໃຈ ເຮົາຈັກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າອີກ ຈະທູນຖາມເນື້ອຄວາມນັ້ນ

ຖ້າພຣະຜູ້ມີພຣະພາກເຈົ້າ ຈັກຕັດຕອບເຮົາວ່າ "ໂລກທ່ຽງ ຯລຯ ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ເຮົາກໍຈັກປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າຕໍ່ໄປ

ຖ້າພຣະຜູ້ມີພຣະພາກເຈົ້າ ຈັກບໍ່ຕັດຕອບເຮົາວ່າ "ໂລກທ່ຽງ ໂລກບໍ່ທ່ຽງ ໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ຊີວະກັບສະຣີຣະເປັນແນວດຽວກັນ ຊີວະກັບສະຣີຣະເປັນຄົນລະແນວກັນ ຫລັງຈາກ ຕາຍແລ້ວຕະຖາຄົດເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫລັກຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ເຮົາກໍຈັກລາສິກຂາໄປເປັນຄະຫຼືຫັດ"

[໑໘໓] ເມື່ອເວລາແລງ ທ່ານພຣະມາລຸງກະຍະບຸດອອກຈາກທີ່ຫຼີບຫຼີກ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

[໑໘໔] "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ເມື່ອຂ້າພຣະອົງຢູ່ໃນ ທີ່ສະຫງັດ ຫຼີບຫຼີກຢູ່ ໄດ້ເກີດຄວາມຄິດຄຳນຶງແນວນີ້ວ່າ "ທິດຖິທີ່ພຣະຜູ້ມີພຣະພາກເຈົ້າບໍ່ ຕັດຕອບຊົງງົດ ຊົງວາງເສີຍເຫລົ່ານີ້ ຄື ທິດຖິວ່າ "ໂລກທ່ຽງ ໂລກບໍ່ທ່ຽງ ໂລກມີ ທີ່ສຸດ ໂລກບໍ່ມີທີ່ສຸດ ຊີວະກັບສະຣີຣະເປັນແນວດຽວກັນ ຊີວະກັບສະຣີຣະເປັນຄົນລະແນວກັນ ຫລັງຈາກຕາຍແລ້ວຕະຖາຄົດເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ການທີ່ພຣະຜູ້ມີພຣະພາກເຈົ້າບໍ່ຊົງຕອບທິດຖິເຫຼົ່ານັ້ນແກ່ເຮົາ ເຮົາບໍ່ພໍໃຈ ເຮົາບໍ່ພໍໃຈ ເຮົາຈັກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າອີກ ຈະທູນຖາມເນື້ອຄວາມນັ້ນ

ຖ້າພຣະຜູ້ມີພຣະພາກເຈົ້າຈັກຕັດຕອບເຮົາວ່າ "ໂລກທ່ຽງ ຯລຯ ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ເຮົາກໍຈັກປະພຶດພົມມະຈັນໃນ ພຣະຜູ້ມີພຣະພາກເຈົ້າຕໍ່ໄປ

ຖ້າພຣະຜູ້ມີພຣະພາກເຈົ້າຈັກບໍ່ຕັດຕອບແກ່ເຮົາວ່າ "ໂລກທ່ຽງ ໂລກບໍ່ທ່ຽງ ໂລກມີ ທີ່ສຸດ ໂລກບໍ່ມີທີ່ສຸດ ຊີວະກັບສະຣີຣະເປັນແນວດຽວກັນ ຊີວະກັບສະຣີຣະເປັນຄົນລະແນວກັນ ຫລັງຈາກຕາຍແລ້ວຕະຖາຄົດເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ເຮົາກໍຈັກລາສິກຂາໄປເປັນຄະຫຼືຫັດ

ຖ້າພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ "ໂລກທ່ຽງ" ຂໍຈົ່ງຕັດຕອບຂ້າພຣະອົງເທີ້ນວ່າ "ໂລກທ່ຽງ"

ຖ້າພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ "ໂລກບໍ່ທ່ຽງ" ຂໍຈົ່ງຕັດຕອບຂ້າພຣະອົງເທີ້ນວ່າ "ໂລກບໍ່ທ່ຽງ"

ຖ້າພຣະຜູ້ມີພຣະພາກເຈົ້າບໍ່ຊົງຮູ້ວ່າ "ໂລກທ່ຽງ ຫຼື ໂລກບໍ່ທ່ຽງ, ເມື່ອບໍ່ຊົງຮູ້ ບໍ່ຊົງເຫັນ ກໍຂໍໃຫ້ຕັດບອກມາກົງ ໆ ເທີ້ນວ່າ "ເຮົາບໍ່ຮູ້ ເຮົາບໍ່ເຫັນ"

ຖ້າພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ "ໂລກມີທີ່ສຸດ" ຂໍຈົ່ງຕັດຕອບຂ້າພຣະອົງເທີ້ນວ່າ "ໂລກມີທີ່ສຸດ"

ຖ້າພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ "ໂລກບໍ່ມີທີ່ສຸດ" ຂໍຈົ່ງຕັດຕອບຂ້າພຣະອົງເທີ້ນວ່າ "ໂລກບໍ່ມີທີ່ສຸດ"

ຖ້າພຣະຜູ້ມີພຣະພາກເຈົ້າບໍ່ຊົງຮູ້ວ່າ "ໂລກມີທີ່ສຸດ ຫຼື ໂລກບໍ່ມີທີ່ສຸດ" ເມື່ອບໍ່ຊົງຮູ້ ບໍ່ຊົງເຫັນ ກໍຂໍໃຫ້ຕັດບອກມາກົງ ໆ ເທີ້ນວ່າ "ເຮົາບໍ່ຮູ້ ເຮົາບໍ່ເຫັນ"

ຖ້າພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ "ຊີວະກັບສະຣີຣະເປັນແນວດຽວກັນ" ຂໍຈົ່ງຕັດຕອບຂ້າພຣະອົງເທີ້ນວ່າ "ຊີວະກັບສະຣີຣະເປັນແນວດຽວກັນ"

ຖ້າພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ "ຊີວະກັບສະຣີຣະເປັນຄົນລະແນວກັນ" ຂໍຈົ່ງຕັດຕອບຂ້າພຣະອົງເທີ້ນວ່າ "ຊີວະກັບສະຣີຣະເປັນຄົນລະແນວກັນ"

ຖ້າພຣະຜູ້ມີພຣະພາກເຈົ້າບໍ່ຊົງຮູ້ວ່າ "ຊີວະກັບສະຣີຣະເປັນແນວດຽວກັນ ຫຼື ຊີວະກັບສະຣີຣະເປັນຄົນລະແນວກັນ" ເມື່ອບໍ່ຊົງຮູ້ ບໍ່ຊົງເຫັນ ກໍຂໍໃຫ້ຕັດບອກມາກົງ ໆ ເທີ້ນວ່າ "ເຮົາບໍ່ຮູ້ເຮົາບໍ່ເຫັນ"

ຖ້າພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ "ຫລັງຈາກຕາຍແລ້ວຕະຖາຄົດເກີດອີກ" ຂໍຈົ່ງ ຕັດຕອບຂ້າພຣະອົງເທີ້ນວ່າ "ຫລັງຈາກຕາຍແລ້ວຕະຖາຄົດເກີດອີກ"

ຖ້າພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ "ຫລັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ" ຂໍຈົ່ງຕັດຕອບຂ້າພຣະອົງເທີ້ນວ່າ "ຫລັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ"

ຖ້າພຣະຜູ້ມີພຣະພາກເຈົ້າບໍ່ຊົງຮູ້ວ່າ "ຫລັງຈາກຕາຍແລ້ວຕະຖາຄົດເກີດອີກ ຫຼື ຫລັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ" ເມື່ອບໍ່ຊົງຮູ້ ບໍ່ຊົງເຫັນ ກໍຂໍໃຫ້ຕັດບອກມາ ກົງ ໆ ເທີ້ນວ່າ "ເຮົາບໍ່ຮູ້ ເຮົາບໍ່ເຫັນ"

ຖ້າພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ "ຫລັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ" ຂໍຈົ່ງຕັດຕອບຂ້າພຣະອົງເທີ້ນວ່າ "ຫລັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ"

ຖ້າພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ "ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່

ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ຂໍຈົ່ງຕັດຕອບຂ້າພຣະອົງເທີ້ນວ່າ "ຫລັງຈາກຕາຍແລ້ວຕະຖາຄົດ ຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ"

ຖ້າພຣະຜູ້ມີພຣະພາກເຈົ້າບໍ່ຊົງຮູ້ວ່າ "ຫລັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ ຫຼື ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ເມື່ອບໍ່ຊົງຮູ້ ບໍ່ຊົງເຫັນ ກໍຂໍໃຫ້ຕັດບອກມາກົງ ໆ ເທີ້ນວ່າ "ເຮົາບໍ່ຮູ້ ເຮົາບໍ່ເຫັນ"

[໑໔໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມາລຸງກະຍະບຸດ ເຮົາໄດ້ເວົ້າໄວ້ແນວນັ້ນກັບທ່ານຫຼືວ່າ "ທ່ານຈົ່ງມາປະພຶດພົມມະຈັນໃນເຮົາເທີ້ນ ເຮົາຈັກຕອບທ່ານວ່າ "ໂລກທ່ຽງ ໂລກບໍ່ທ່ຽງ ໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ຊີວະກັບສະຣີຣະເປັນແນວດຽວກັນ ຊີວະກັບ ສະຣີຣະເປັນຄົນລະແນວກັນ ຫລັງຈາກຕາຍແລ້ວຕະຖາຄົດເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດ ຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ແດ່ບໍ?"

ທ່ານພຣະມາລຸງກະຍະບຸດຂາບທູນວ່າ "ບໍ່ ຂ້ານ້ອຍ"

"ກໍ ຫຼື ວ່າ ທ່ານໄດ້ເວົ້າໄວ້ກັບເຮົາແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຈັກປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ ຖ້າພຣະຜູ້ມີພຣະພາກເຈົ້າຈັກຕັດຕອບຂ້າພຣະອົງ ວ່າ "ໂລກທ່ຽງ ໂລກບໍ່ທ່ຽງ ໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ຊີວະກັບສະຣີຣະເປັນແນວດຽວກັນ ຊີວະກັບສະຣີຣະເປັນຄົນລະແນວກັນ ຫລັງຈາກຕາຍແລ້ວຕະຖາຄົດເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ແດ່ບໍ?"

"ບໍ່ ຂ້ານ້ອຍ"

"ມາລຸງກະຍະບຸດ ໄດ້ຂ່າວວ່າ ເຮົາບໍ່ໄດ້ເວົ້າໄວ້ກັບທ່ານດັ່ງນີ້ວ່າ "ທ່ານຈົ່ງມາປະພຶດພົມມະຈັນໃນເຮົາເທີ້ນ ເຮົາຈັກຕອບທ່ານວ່າ "ໂລກທ່ຽງ ໂລກບໍ່ທ່ຽງ ຯລຯ ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ຯລຯ ໄດ້ຂ່າວວ່າ ແມ່ນທ່ານກໍບໍ່ໄດ້ເວົ້າ ກັບເຮົາວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງຈັກປະພຶດພົມມະຈັນໃນພຣະຜູ້ມີພຣະພາກ ຖ້າພຣະຜູ້ມີພຣະພາກເຈົ້າຈັກຕັດຕອບຂ້າພຣະອົງວ່າ "ໂລກທ່ຽງ ໂລກບໍ່ທ່ຽງ ຯລຯ ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ"

ໂມຄະບຸຣຸດ ເມື່ອເປັນແນວນັ້ນ ທ່ານເປັນໃຜ ຈະມາທວງອັນໃດກັບໃຜນໍ?

## ຊົງອຸປະມາດ້ວຍບຸກຄົນຜູ້ຖືກສອນ

[໑໘໖] ມາລຸງກະຍະບຸດ ບຸກຄົນໃດຈະເພິ່ງກ່າວແນວນີ້ວ່າ "ຕາບໃດທີ່ພຣະຜູ້ມີ ພຣະພາກຍັງບໍ່ຊົງຕອບເຮົາວ່າ "ໂລກທ່ຽງ ໂລກບໍ່ທ່ຽງ ຯລຯ ຫລັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍ່ບໍ່ແມ່ນ ຈະວ່າບໍ່ເກີດອີກກໍ່ບໍ່ແມ່ນ" ຕາບນັ້ນ ເຮົາກໍຈັກບໍ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ ຕໍ່ໃຫ້ບຸກຄົນນັ້ນສິ້ນຊີວິດໄປຕະຖາຄົດກໍບໍ່ຕອບເລື່ອງນັ້ນ ປຽບຄື ບຸຣຸດຖືກຍິ່ງດ້ວຍລູກສອນທີ່ອາບຢາພິດຢ່າງຮ້າຍແຮງ ມິດອຳມາດ ຍາດສາໂລຫິດຂອງບຸຣຸດນັ້ນ ເພິ່ງໄປຫາແພດ ຜູ້ຊ່ຽວຊານໃນການປາດມາຖືຮັກສາບຸຣຸດຜູ້ຖືກລູກສອນນັ້ນເພິ່ງກ່າວແນວນີ້ວ່າ "ຕາບໃດທີ່ເຮົາຍັງບໍ່ຮູ້ຈັກຄົນທີ່ຍິງເຮົາວ່າ ເປັນກະສັດ ພາມ ແພດ ຫຼື ສູດ ຕາບນັ້ນ ເຮົາກໍຈັກບໍ່ຖອນລູກສອນນີ້ອອກເດັດຂາດ"

ບຸຣຸດຜູ້ຖືກລູກສອນນັ້ນ ເພິ່ງກ່າວແນວນີ້ວ່າ "ຕາບໃດທີ່ເຮົາຍັງບໍ່ຮູ້ຈັກຄົນທີ່ຍິງເຮົາວ່າ ມີຊື່ແນວນີ້ ມີໂຄດແນວນີ້ ຕາບນັ້ນ ເຮົາກໍຈັກບໍ່ຖອນລູກສອນນີ້ອອກເດັດຂາດ"

ບຸຣຸດຜູ້ຖືກລູກສອນນັ້ນ ເພິ່ງກ່າວແນວນີ້ວ່າ "ຕາບໃດທີ່ເຮົາຍັງບໍ່ຮູ້ຈັກຄົນທີ່ຍິງເຮົາວ່າ ເປັນຄົນສູງ ຕໍ່າ ຫຼື ປານກາງ ຕາບນັ້ນ ເຮົາກໍຈັກບໍ່ຖອນລູກສອນນີ້ອອກເດັດຂາດ"

ບຸຣຸດຜູ້ຖືກລູກສອນນັ້ນ ເພິ່ງກ່າວແນວນີ້ວ່າ "ຕາບໃດທີ່ເຮົາຍັງບໍ່ຮູ້ຈັກຄົນທີ່ຍິງເຮົາວ່າ ເປັນຄົນຜິວດຳ ຜິວແຫຼ້ ຫຼື ຜິວສອງສີ ຕາບນັ້ນ ເຮົາກໍຈັກບໍ່ຖອນລູກສອນນີ້ອອກເດັດຂາດ"

ບຸຣຸດຜູ້ຖືກລູກສອນນັ້ນ ເພິ່ງກ່າວແນວນີ້ວ່າ "ຕາບໃດທີ່ເຮົາຍັງບໍ່ຮູ້ຈັກຄົນທີ່ຍິງເຮົາວ່າ ຢູ່ໃນເຮືອນ ນິຄົມ ຫຼື ນະຄອນຊື່ນັ້ນ ຕາບນັ້ນ ເຮົາກໍຈັກບໍ່ຖອນລູກສອນນີ້ອອກເດັດຂາດ"

ບຸຣຸດຜູ້ຖືກລູກສອນນັ້ນເພິ່ງກ່າວແນວນີ້ວ່າ "ຕາບໃດທີ່ເຮົາຍັງບໍ່ຮູ້ຈັກທະນູທີ່ເຂົາໃຊ້ຍິງເຮົາວ່າ ເປັນຊະນິດມີແລ່ງ ຫຼື ຊະນິດລູກສອນ ຕາບນັ້ນ ເຮົາກໍຈັກບໍ່ຖອນລູກສອນນີ້ອອກເດັດຂາດ"

ບຸຣຸດຜູ້ຖືກລູກສອນນັ້ນເພິ່ງກ່າວແນວນີ້ວ່າ "ຕາບໃດທີ່ເຮົາຍັງບໍ່ຮູ້ຈັກສາຍທະນູທີ່ເຂົາໃຊ້ຍິງເຮົາວ່າ ເປັນສາຍທີ່ເຮັດດ້ວຍປໍ ຜິວໄມ້ໄຜ່ ເອັນ ປ່ານ ຫຼື ເຍື່ອໄມ້ ຕາບນັ້ນ ເຮົາກໍຈັກບໍ່ຖອນລູກສອນນີ້ອອກເດັດຂາດ"

ບຸຣຸດຜູ້ຖືກລູກສອນນັ້ນ ເພິ່ງກ່າວແນວນີ້ວ່າ "ຕາບໃດທີ່ເຮົາຍັງບໍ່ຮູ້ຈັກລູກທະນູທີ່ເຂົາໃຊ້ຍິງ ເຮົາວ່າ ເປັນທະນູທີ່ເຮັດດ້ວຍໄມ້ເກີດເອງ ຫຼື ໄມ້ຄັດປູກ ຕາບນັ້ນ ເຮົາກໍຈັກບໍ່ຖອນລູກສອນນີ້ອອກເດັດຂາດ"

ບຸຣຸດຜູ້ຖືກລູກສອນນັ້ນເພິ່ງກ່າວແນວນີ້ວ່າ "ຕາບໃດທີ່ເຮົາຍັງບໍ່ຮູ້ຈັກທາງລູກສອນທີ່ເຂົາໃຊ້ຍິງເຮົາວ່າ ເປັນທາງທີ່ສຽບດ້ວຍຂົນປີກນົກແຮ້ງ ນົກຕະຣະກຣຸມ ນົກແຫລວ ນົກຍູງ ຫຼື ນົກປາກທ່າງ ຕາບນັ້ນ ເຮົາກໍຈັກບໍ່ຖອນລູກສອນນີ້ອອກເດັດຂາດ"

ບຸຣຸດຜູ້ຖືກລູກສອນນັ້ນເພິ່ງກ່າວແນວນີ້ວ່າ "ຕາບໃດທີ່ເຮົາຍັງບໍ່ຮູ້ຈັກລູກສອນທີ່ເຂົາໃຊ້ຍິງເຮົາວ່າ ເປັນສິ່ງທີ່ເຂົາພັນດ້ວຍເອັນງົວ ເອັນຄວາຍ ເອັນຄ່າງ ຫຼື ເອັນລິງ ຕາບນັ້ນ ເຮົາກໍຈັກບໍ່ຖອນລູກສອນນີ້ອອກເດັດຂາດ"

ບຸຣຸດຜູ້ຖືກລູກສອນນັ້ນເພິ່ງກ່າວແນວນີ້ວ່າ "ຕາບໃດທີ່ເຮົາຍັງບໍ່ຮູ້ຈັກລູກທະນູທີ່ເຂົາໃຊ້ຍິງ ເຮົາວ່າ ເປັນລູກສອນທຳມະດາ ລູກສອນຄົມ ລູກສອນຫົວລູກສອນ ລູກສອນຫົວໂລຫະ ລູກສອນຫົວ ຂ້ຽວສັດ ຫຼື ລູກສອນພິເສດ ຕາບນັ້ນເຮົາກໍຈັກບໍ່ຖອນລູກສອນນີ້ອອກເດັດຂາດ" ຕໍ່ໃຫ້ບຸຣຸດນັ້ນ ຕາຍໄປ ເຂົາກໍຈະບໍ່ຮູ້ເລື້ອງນັ້ນເລີຍ ສັນໃດ

ບຸກຄົນໃດເພິ່ງກ່າວແນວນີ້ວ່າ "ຕາບໃດທີ່ພຣະຜູ້ມີພຣະພາກເຈົ້າບໍ່ຕັດຕອບວ່າ "ໂລກທ່ຽງ ໂລກບໍ່ທ່ຽງ ໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ຊີວະກັບສະຣີຣະເປັນແນວດຽວກັນ ຊີວະ ກັບສະຣີຣະເປັນຄົນລະແນວກັນ ຫລັງຈາກຕາຍແລ້ວຕະຖາຄົດເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ຕາບນັ້ນ ເຮົາກໍຈັກບໍ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ" ຕໍ່ໃຫ້ບຸກຄົນນັ້ນຕາຍໄປ ຕະຖາຄົດກໍບໍ່ຕອບເລື້ອງນັ້ນ ສັນນັ້ນຄືກັນ

[໑໘໗] ມາລຸງກະຍະບຸດ ເມື່ອມີຄວາມເຫັນວ່າ "ໂລກທ່ຽງ" ຈັກໄດ້ມີການຢູ່ປະພຶດພົມມະຈັນກັນກໍບໍ່ແມ່ນ

ເມື່ອມີຄວາມເຫັນວ່າ "ໂລກບໍ່ທ່ຽງ" ຈັກໄດ້ມີການຢູ່ປະພຶດພົມມະຈັນກັນ ຫຼື ກໍເປັນໄປບໍ່ໄດ້ ແມ່ນເມື່ອມີຄວາມເຫັນວ່າ "ໂລກທ່ຽງ ຫຼື ໂລກບໍ່ທ່ຽງ" ຊາດ (ຄວາມເກີດ) ຊະຣາ (ຄວາມແກ່) ມໍລະນະ (ຄວາມຕາຍ) ໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມໄຫ້ຈົ່ມ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະ ອຸປາຍາດ (ຄວາມຄັບແຄ້ນໃຈ) ກໍຍັງຄົງມີຢູ່ຕາມປົກກະຕິ ເຮົາຈຶ່ງບັນຍັດສະເພາະການກຳຈັດຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດໃນປັດຈຸບັນ

ເມື່ອມີຄວາມເຫັນວ່າ "ໂລກມີທີ່ສຸດ" ຈັກໄດ້ມີການຢູ່ປະພຶດພົມມະຈັນກັນ ຫຼື ກໍເປັນໄປບໍ່ໄດ້ ເມື່ອມີຄວາມເຫັນວ່າ "ໂລກບໍ່ມີທີ່ສຸດ" ຈັກໄດ້ມີການຢູ່ປະພຶດພົມມະຈັນກັນ ຫຼື ກໍເປັນໄປບໍ່ໄດ້ ແມ່ນເມື່ອມີຄວາມເຫັນວ່າ "ໂລກມີທີ່ສຸດ ຫຼືໂລກບໍ່ມີທີ່ສຸດ" ຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດກໍຍັງຄົງມີຢູ່ຕາມປົກກະຕິ ເຮົາຈຶ່ງບັນຍັດການ

ກຳຈັດ ຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດໃນປັດຈຸບັນ

ເມື່ອມີຄວາມເຫັນວ່າ "ຊີວະກັບສະຣີຣະເປັນແນວດຽວກັນ" ຈັກໄດ້ມີການຢູ່ປະພຶດພົມມະຈັນກັນກໍບໍ່ແມ່ນ

ເມື່ອມີຄວາມເຫັນວ່າ "ຊີວະກັບສະຣີຣະເປັນຄົນລະແນວກັນ" ຈັກໄດ້ມີການຢູ່ປະພຶດພົມມະຈັນກັນກໍບໍ່ແມ່ນ

ແມ່ນເມື່ອມີຄວາມເຫັນວ່າ "ຊີວະກັບສະຣີຣະເປັນແນວດຽວກັນ ຫຼື ຊີວະກັບສະຣີຣະເປັນຄົນລະແນວກັນ" ຊາດ ໗ລ໗ ເຮົາຈຶ່ງບັນຍັດສະເພາະການກຳຈັດ ຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດໃນປັດຈຸບັນ

ເມື່ອມີຄວາມເຫັນວ່າ "ຫລັງຈາກຕາຍແລ້ວຕະຖາຄົດເກີດອີກ" ຈັກໄດ້ມີການຢູ່ປະພຶດພົມມະຈັນກັນກໍບໍ່ແມ່ນ

ເມື່ອມີຄວາມເຫັນວ່າ "ຫລັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ" ຈັກໄດ້ມີການຢູ່ປະພຶດພົມມະຈັນກັນກໍບໍ່ແມ່ນ

ແມ່ນເມື່ອມີຄວາມເຫັນວ່າ "ຫລັງຈາກຕາຍແລ້ວຕະຖາຄົດເກີດອີກ ຫຼື ຫລັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ" ຊາດ ໗ລ໗ ເຮົາຈຶ່ງບັນຍັດສະເພາະການກຳຈັດຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດໃນປັດຈຸບັນ

ເມື່ອມີຄວາມເຫັນວ່າ "ຫລັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ" ຈັກໄດ້ມີການຢູ່ປະພຶດພົມມະຈັນກັນກໍບໍ່ແມ່ນ

ເມື່ອມີຄວາມເຫັນວ່າ "ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ຈັກໄດ້ມີການຢູ່ປະພຶດພົມມະຈັນກັນກໍບໍ່ແມ່ນ

ມາລຸງກະຍະບຸດ ແມ່ນເມື່ອມີຄວາມເຫັນວ່າ "ຫລັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ ເກີດອີກ ຫຼື ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດກໍຍັງຄົງມີຢູ່ຕາມປົກກະຕິ ເຮົາຈຶ່ງບັນຍັດສະເພາະການກຳຈັດຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດໃນປັດຈຸບັນ

## ເຫດທີ່ພຣະພຸດທະເຈົ້າບໍ່ຊົງຕອບບັນຫາເຊີງປັດຊະຍາ

[໑໔໗] ມາລຸງກະຍະບຸດ ຍ້ອນເຫດນັ້ນແລ ທ່ານຈົ່ງຈືບັນຫາທີ່ເຮົາບໍ່ຕອບວ່າ ເປັນບັນຫາທີ່ເຮົາບໍ່ຕອບ ແລະ ຈົ່ງຈືບັນຫາທີ່ເຮົາຕອບວ່າ ເປັນບັນຫາທີ່ເຮົາຕອບເທີ້ນ

ບັນຫາອັນໃດນໍ? ທີ່ເຮົາບໍ່ຕອບ

ຄື ບັນຫາວ່າ "ໂລກທ່ຽງ ໂລກບໍ່ທ່ຽງ ໂລກມີທີ່ສຸດ ໂລກບໍ່ມີທີ່ສຸດ ຊີວະກັບສະຣີຣະເປັນແນວດຽວກັນ ຊີວະກັບສະຣີຣະເປັນຄົນລະແນວກັນ ຫລັງຈາກຕາຍແລ້ວຕະຖາຄົດເກີດອີກຫລັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ເຮົາບໍ່ຕອບ

ຍ້ອນເຫດໃດເຮົາຈຶ່ງບໍ່ຕອບ

ຍ້ອນບັນຫານັ້ນ ບໍ່ມີປະໂຫຍດ ບໍ່ເປັນເບື້ອງຕົ້ນແຫ່ງພົມມະຈັນ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ແລະເພື່ອນິບພານ ເຫດນັ້ນເຮົາຈຶ່ງບໍ່ຕອບ

ບັນຫາອັນໃດນໍ? ທີ່ເຮົາຕອບ

ຄື ບັນຫາວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣດ ນີ້ທຸກຂະນິໂຣດຄາມີນີປະຕິປະທາ" ເຮົາຕອບ

ຍ້ອນເຫດໃດເຮົາຈຶ່ງຕອບ

ຍ້ອນບັນຫານັ້ນມີປະໂຫຍດ ເປັນເບື້ອງຕົ້ນແຫ່ງພົມມະຈັນ ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ແລະ ເພື່ອນິບພານ ເຫດນັ້ນເຮົາຈຶ່ງຕອບ

ມາລຸງກະຍະບຸດ ຍ້ອນເຫດນັ້ນ ທ່ານຈົ່ງຈືບັນຫາທີ່ເຮົາບໍ່ຕອບວ່າ ເປັນບັນຫາທີ່ ເຮົາບໍ່ຕອບ ແລະ ຈົ່ງຈືບັນຫາທີ່ເຮົາຕອບວ່າ ເປັນບັນຫາທີ່ເຮົາຕອບໄວ້ດ້ວຍອາການຢ່າງນີ້ເທີ້ນ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະມາລຸງກະຍະບຸດມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ຈູລະມາລຸງກະຍະສູດທີ່ ໓ ຈົບ**

# ໘. ມະຫາມາລຸງກະຍະສູດ

## ວ່າດ້ວຍພຣະມາລຸງກະຍະບຸດ ສູດໃຫຍ່

## ໂອຣຳພາຄິຍະສັງໂຍດ ໕ ປະການ

[໑໒໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫລາຍມາຕັດວ່າ “ພິກຂຸທັງຫລາຍ” ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີ ພຣະພາກຈຶ່ງໄດ້ຕັດວ່າ “ພິກຂຸທັງຫລາຍ ທ່ານທັງຫລາຍຍັງຈືໂອຣຳພາຄິຍະສັງໂຍດ (ສັງໂຍດເບື້ອງຕ່ຳ) ໕ ປະການທີ່ເຮົາສະແດງແລ້ວ ໄດ້ບໍ?”

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະມາລຸງກະຍະບຸດໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຍັງຈືໂອຣຳພາຄິຍະສັງໂຍດ ໕ ປະການທີ່ພຣະອົງຊົງສະແດງໄວ້ແລ້ວໄດ້”

“ທ່ານຈືໂອຣຳພາຄິຍະສັງໂຍດ ໕ ປະການ ທີ່ເຮົາສະແດງໄວ້ແລ້ວ ແນວໃດແດ່?”

“ຂ້າພຣະອົງ ຈືໂອຣຳພາຄິຍະສັງໂຍດ ຄື ສັກກາຍະທິດຖິ (ຄວາມເຫັນວ່າເປັນໂຕຂອງຕົນ) ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວໄດ້

ຂ້າພຣະອົງຈືໂອຣຳພາຄິຍະສັງໂຍດ ຄື ວິຈິກິດສາ (ຄວາມລັງເລສົງໄສ) ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວໄດ້

ຂ້າພຣະອົງຈືໂອຣຳພາຄິຍະສັງໂຍດ ຄື ສີລັບພະຕະປະຣາມາດ (ຄວາມຖືໝັ້ນສິນພົດ) ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວໄດ້

ຂ້າພຣະອົງຈືໂອຣຳພາຄິຍະສັງໂຍດ ຄື ກາມສັນທະ (ຄວາມພໍໃຈໃນກາມ) ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວໄດ້

ຂ້າພຣະອົງຈືໂອຣຳພາຄິຍະສັງໂຍດ ຄື ພະຍາບາດ (ຄວາມຄິດຮ້າຍ) ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວໄດ້

ຂ້າພຣະອົງຈື່ໂອຣຳພາຄິຍະສັງໂຍດ ໕ ປະການນີ້ ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວໄດ້ຢ່າງນີ້ ຂ້ານ້ອຍ"

"ມາລຸງກະຍະບຸດ ທ່ານຈື່ໂອຣຳພາຄິຍະສັງໂຍດ ໕ ປະການນີ້ທີ່ເຮົາສະແດງໄວ້ແລ້ວແນວນີ້ແກ່ໃຜ ອັນຍະເດຍຣະຖີປະຣິພາຊົກທັງຫລາຍ ຈັກທັກລ້າງດ້ວຍການນຳເລື້ອງເດັກອ່ອນມາປຽບທຽບໄດ້ ບໍ່ແມ່ນບໍ ຍ້ອນເດັກອ່ອນທີ່ນອນຫງາຍຍ່ອມບໍ່ມີແມ່ນແຕ່ຄວາມຄິດວ່າ "ໂຕຂອງຕົນ" ສັກກາຍະທິດຖີຈັກເກີດຂຶ້ນແກ່ເດັກນັ້ນໄດ້ແນວໃດ ສັກກາຍະທິດຖີຂອງເດັກນັ້ນ ກໍຍັງນອນຈົມຢູ່

ຍ້ອນເດັກອ່ອນທີ່ນອນຫງາຍຍ່ອມບໍ່ມີແມ່ນແຕ່ຄວາມຄິດວ່າ "ທຳທັງຫລາຍ" ວິຈິກິດສາໃນທຳທັງຫລາຍຈັກເກີດຂຶ້ນແກ່ເດັກນັ້ນໄດ້ແນວໃດ ວິຈິກິດສາຂອງເດັກນັ້ນ ກໍຍັງນອນຈົມຢູ່

ຍ້ອນເດັກອ່ອນທີ່ນອນຫງາຍຍ່ອມບໍ່ມີແມ່ນແຕ່ຄວາມຄິດວ່າ "ສິນທັງຫລາຍ" ສີລັບພະຕະປະຣາມາສໃນສິນທັງຫລາຍ ຈັກເກີດຂຶ້ນແກ່ເດັກນັ້ນໄດ້ແນວໃດ ສີລັບພະຕະປະຣາມາດຂອງເດັກນັ້ນ ກໍຍັງນອນຈົມຢູ່

ຍ້ອນເດັກອ່ອນທີ່ນອນຫງາຍຍ່ອມບໍ່ມີແມ່ນແຕ່ຄວາມຄິດວ່າ "ກາມທັງຫລາຍ" ກາມສັນທະໃນກາມທັງຫລາຍ ຈັກເກີດຂຶ້ນແກ່ເດັກນັ້ນໄດ້ແນວໃດ ກາມລາຄະຂອງເດັກນັ້ນ ກໍຍັງນອນຈົມຢູ່

ຍ້ອນເດັກອ່ອນທີ່ນອນຫງາຍ ຍ່ອມບໍ່ມີແມ່ນແຕ່ຄວາມຄິດວ່າ "ສັດທັງຫລາຍ" ຄວາມພະຍາບາດໃນສັດທັງຫລາຍຈັກເກີດຂຶ້ນແກ່ເດັກນັ້ນໄດ້ແນວໃດ ພະຍາບາດຂອງເດັກນັ້ນ ກໍຍັງນອນຈົມຢູ່

ອັນຍະເດຍຣະຖີປະຣິພາຊົກທັງຫລາຍ ຈັກທັກລ້າງດ້ວຍການນຳເລື້ອງເດັກອ່ອນມາປຽບທຽບໄດ້ ບໍ່ແມ່ນບໍ?"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະອານົນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ບັດນີ້ເປັນການທີ່ສົມຄວນ ຂ້າແດ່ພຣະສຸຄົດບັດນີ້ເປັນການທີ່ສົມຄວນທີ່ພຣະຜູ້ມີພຣະພາກເຈົ້າ ຈະຊົງສະແດງໂອຣຳພາຄິຍະສັງໂຍດ ໕ ປະການ ພິກຂຸທັງຫລາຍ ໄດ້ສະດັບຈາກພຣະຜູ້ມີພຣະພາກເຈົ້າແລ້ວ ຈັກຊົງຈຳໄວ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ຖ້າເຊັ່ນນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກ

ກ່າວ" ເມື່ອທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

## ອຸບາຍເຄື່ອງລະສັງໂຍດ

[໑໘໐] "ອານົນ ປຸຖຸຊົນໃນໂລກນີ້ ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ມີຈິດຖືກ ສັກກາຍະທິດຖິກຸ້ມຮຸມ ຖືກສັກກາຍະທິດຖິຄອບງຳຢູ່ ແລະ ບໍ່ຮູ້ອຸບາຍເຄື່ອງກຳຈັດສັກກາຍະທິດຖິ ທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ສັກກາຍະທິດຖິນັ້ນຂອງເຂົາມີກຳລັງແກ່ກ້າຂຶ້ນ ປຸຖຸຊົນບັນເທົາບໍ່ໄດ້ ຈຶ່ງຊື່ວ່າເປັນໂອຣຳພາຄິຍະສັງໂຍດ

ປຸຖຸຊົນມີຈິດຖືກວິຈິກິດສາກຸ້ມຮຸມ ຖືກວິຈິກິດສາຄອບງຳຢູ່ ແລະບໍ່ຮູ້ອຸບາຍເຄື່ອງກຳຈັດວິຈິກິດສາທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ວິຈິກິດສານັ້ນຂອງເຂົາມີກຳລັງແກ່ກ້າຂຶ້ນ ປຸຖຸຊົນບັນເທົາບໍ່ໄດ້ ຈຶ່ງຊື່ວ່າເປັນໂອຣຳພາຄິຍະສັງໂຍດ

ປຸຖຸຊົນມີຈິດຖືກສີລັບພະຕະປະຣາມາດກຸ້ມຮຸມ ຖືກສີລັບພະຕະປະຣາມາດຄອບງຳຢູ່ ແລະບໍ່ຮູ້ອຸບາຍເຄື່ອງກຳຈັດສີລັບພະຕະປະຣາມາດທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ສີລັບພະຕະປະຣາມາດນັ້ນຂອງເຂົາມີກຳລັງແກ່ກ້າຂຶ້ນ ປຸຖຸຊົນບັນເທົາບໍ່ໄດ້ ຈຶ່ງຊື່ວ່າ ເປັນໂອຣຳພາຄິຍະສັງໂຍດ

ປຸຖຸຊົນມີຈິດຖືກກາມລາຄະກຸ້ມຮຸມ ຖືກກາມລາຄະຄອບງຳຢູ່ ແລະ ບໍ່ຮູ້ອຸບາຍເຄື່ອງກຳຈັດກາມລາຄະທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ກາມລາຄະນັ້ນຂອງເຂົາມີກຳລັງແກ່ກ້າຂຶ້ນ ປຸຖຸຊົນບັນເທົາບໍ່ໄດ້ ຈຶ່ງຊື່ວ່າເປັນໂອຣຳພາຄິຍະສັງໂຍດ

ປຸຖຸຊົນມີຈິດຖືກພະຍາບາດກຸ້ມຮຸມ ຖືກພະຍາບາດຄອບງຳຢູ່ ແລະ ບໍ່ຮູ້ອຸບາຍເຄື່ອງກຳຈັດພະຍາບາດທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ພະຍາບາດນັ້ນຂອງເຂົາມີກຳລັງແກ່ກ້າຂຶ້ນ ປຸຖຸຊົນບັນເທົາບໍ່ໄດ້ ຈຶ່ງຊື່ວ່າເປັນໂອຣຳພາຄິຍະສັງໂຍດ

[໑໘໑] ອານົນ ສ່ວນອະຣິຍະສາວົກຜູ້ໄດ້ສະດັບ ໄດ້ເຫັນພຣະອະຣິຍະ ສະຫຼາດໃນທຳຂອງພຣະອະຣິຍະ ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ໄດ້ເຫັນສັດຕະບຸຣຸດ ສະຫຼາດໃນທຳຂອງສັດຕະບຸຣຸດ ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ມີຈິດທີ່ສັກກາຍະທິດຖິກຸ້ມຮຸມບໍ່ໄດ້ ທີ່ສັກກາຍະທິດຖິຄອບງຳບໍ່ໄດ້ຢູ່ ແລະ ຮູ້ອຸບາຍເຄື່ອງກຳຈັດສັກກາຍະທິດຖິທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ອະຣິຍະສາວົກນັ້ນຍ່ອມລະສັກກາຍະທິດຖິນັ້ນພ້ອມທັງອະນຸໄສໄດ້

ອະຣິຍະສາວົກນັ້ນ ມີຈິດທີ່ວິຈິກິດສາກຸ້ມຣຸມບໍ່ໄດ້ ທີ່ວິຈິກິດສາຄອບງຳບໍ່ໄດ້ຢູ່ ແລະຮູ້ອຸບາຍ ເຄື່ອງກຳຈັດວິຈິກິດສາທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ອະຣິຍະສາວົກນັ້ນຍ່ອມລະວິຈິກິດສານັ້ນ ພ້ອມທັງອະນຸໄສໄດ້

ອະຣິຍະສາວົກນັ້ນມີຈິດທີ່ສີລັບພະຕະປະຣາມາດກຸ້ມຣຸມບໍ່ໄດ້ ທີ່ສີລັບພະຕະປະຣາມາດຄອບງຳບໍ່ໄດ້ຢູ່ ແລະ ຮູ້ອຸບາຍເຄື່ອງກຳຈັດສີລັບພະຕະປະຣາມາດທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ອະຣິຍະສາວົກນັ້ນຍ່ອມລະສີລັບພະຕະປະຣາມາດນັ້ນພ້ອມທັງອະນຸໄສໄດ້

ອະຣິຍະສາວົກນັ້ນມີຈິດທີ່ກາມລາຄະກຸ້ມຣຸມບໍ່ໄດ້ ທີ່ກາມລາຄະຄອບງຳບໍ່ໄດ້ຢູ່ ແລະຮູ້ອຸບາຍເຄື່ອງກຳຈັດກາມລາຄະທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ອະຣິຍະສາວົກນັ້ນຍ່ອມລະກາມລາຄະນັ້ນພ້ອມທັງອະນຸໄສໄດ້

ອະຣິຍະສາວົກນັ້ນມີຈິດທີ່ພະຍາບາດກຸ້ມຣຸມບໍ່ໄດ້ ທີ່ພະຍາບາດຄອບງຳບໍ່ໄດ້ຢູ່ ແລະຮູ້ອຸບາຍເຄື່ອງກຳຈັດພະຍາບາດທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ອະຣິຍະສາວົກນັ້ນຍ່ອມລະພະຍາບາດນັ້ນພ້ອມທັງອະນຸໄສໄດ້

## ຂໍ້ປະຕິບັດເພື່ອລະສັງໂຍດ

[໑໖໘] ອານົນ ເປັນໄປບໍ່ໄດ້ເລີຍທີ່ບຸກຄົນບໍ່ອາໄສມັກ ແລະ ປະຕິປະທາທີ່ເປັນໄປເພື່ອລະໂອຣຳພາຄິຍະສັງໂຍດ ໕ ປະການແລ້ວ ຈັກຮູ້ ຈັກເຫັນ ຈັກລະໂອຣຳພາຄິຍະສັງໂຍດ ໕ ປະການໄດ້ ເປັນໄປບໍ່ໄດ້ເລີຍທີ່ບຸກຄົນບໍ່ຖາກເປືອກ ບໍ່ຖາກມອກຂອງຕົ້ນໄມ້ໃຫຍ່ປະເພດຢືນຕົ້ນມີແກ່ນແລ້ວ ຈັກຕັດແກ່ນເລີຍຢ່າງແນ່ນອນ ແມ່ນສັນໃດ ເປັນໄປບໍ່ໄດ້ເລີຍທີ່ບຸກຄົນບໍ່ອາໄສມັກແລະປະຕິປະທາທີ່ເປັນໄປເພື່ອລະໂອຣຳພາຄິຍະສັງໂຍດ ໕ ປະການແລ້ວ ຈັກຮູ້ ຈັກເຫັນ ຈັກລະໂອຣຳພາຄິຍະສັງໂຍດ ໕ ປະການໄດ້ ກໍສັນນັ້ນຄືກັນ

ເປັນໄປໄດ້ທີ່ບຸກຄົນອາໄສມັກ ແລະ ປະຕິປະທາທີ່ເປັນໄປເພື່ອລະໂອຣຳພາຄິຍະສັງໂຍດ ໕ ປະການແລ້ວ ຈັກຮູ້ ຈັກເຫັນ ຈັກລະໂອຣຳພາຄິຍະສັງໂຍດ ໕ ປະການນັ້ນໄດ້ເປັນໄປໄດ້ທີ່ບຸກຄົນຖາກເປືອກ ຖາກມອກຂອງຕົ້ນໄມ້ໃຫຍ່ປະເພດຢືນຕົ້ນມີແກ່ນແລ້ວ ຈັກຕັດ ແກ່ນນັ້ນໄດ້ ແມ່ນສັນໃດ ເປັນໄປໄດ້ທີ່ບຸກຄົນອາໄສມັກ ແລະ ປະຕິປະທາທີ່ເປັນໄປເພື່ອລະໂອຣຳພາຄິຍະ-ສັງໂຍດ ໕ ປະການແລ້ວ ຈັກຮູ້ ຈັກເຫັນ ຈັກລະໂອຣຳພາຄິຍະສັງໂຍດ ໕ ປະການນັ້ນໄດ້ ກໍສັນນັ້ນຄືກັນ

ແມ່ນ້ຳຄົງຄາມີນ້ຳເຕັມຮອດຝັ່ງ ນົກກາ (ກົ້ມ) ດື່ມກິນໄດ້ ຄັ້ງນັ້ນ ບຸຣຸດຜູ້ມີກຳລັງໜ້ອຍມາດ້ວຍຫວັງວ່າ “ເຮົາຈັກລອຍຕັດກະແສນ້ຳແຫ່ງແມ່ນ້ຳຄົງຄານີ້ໄປໃຫ້ເຖິງຝັ່ງໂດຍປອດໄພ”

ເຂົາຈະບໍ່ສາມາດລອຍຕັດກະແສນ້ຳແຫ່ງແມ່ນ້ຳຄົງຄາໄປໃຫ້ເຖິງຝັ່ງໂດຍປອດໄພໄດ້ ແມ່ນສັນໃດ ຄົນລາງຄົນ ກໍສັນນັ້ນຄືກັນ ເມື່ອພຣະທຳມະກະຖຶກສະແດງທຳເພື່ອດັບສັກກາຍະຢູ່ ຈິດຍ່ອມບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງໝັ້ນ ບໍ່ລຸດພົ້ນ ເພິ່ງເຫັນບຸກຄົນເຫຼົ່ານັ້ນ ຄື ບຸຣຸດຜູ້ມີກຳລັງໜ້ອຍນັ້ນ

ອານົນ ແມ່ນ້ຳຄົງຄາມີນ້ຳເຕັມພຽງຝັ່ງ ນົກກາ (ກົ້ມ)ດື່ມກິນໄດ້ ບຸຣຸດຜູ້ມີກຳລັງຫຼາຍມາດ້ວຍຫວັງວ່າ “ເຮົາຈັກລອຍຕັດກະແສນ້ຳແຫ່ງແມ່ນ້ຳຄົງຄານີ້ໄປໃຫ້ເຖິງຝັ່ງໂດຍໂດຍປອດໄພ” ເຂົາຈະບໍ່ສາມາດລອຍຕັດກະແສນ້ຳແຫ່ງແມ່ນ້ຳຄົງຄາໄປໃຫ້ເຖິງຝັ່ງໂດຍປອດໄພໄດ້ ແມ່ນສັນໃດ ຄົນລາງຄົນ ກໍສັນນັ້ນຄືກັນ ເມື່ອພຣະທຳມະກະຖຶກສະແດງທຳເພື່ອດັບສັກກາຍະຢູ່ ຈິດຍ່ອມແລ່ນໄປ ເຫຼື້ອມໃສ ຕັ້ງໝັ້ນ ລຸດພົ້ນ ເພິ່ງເຫັນບຸກຄົນເຫຼົ່ານັ້ນ ຄື ບຸຣຸດຜູ້ມີກຳລັງຫຼາຍນັ້ນ

## **ຮູບຊານ ໔**

[໑໓໓] ມັກ ແລະ ປະຕິປະທາທີ່ເປັນໄປເພື່ອລະໂອຣຳພາຄິຍະສັງໂຍດ ໕ ປະການເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ້ອນລະອະກຸສົນທຳທັງຫລາຍດ້ວຍອຸປະທິວິເວກ ຍ້ອນລະງັບຄວາມຂີ້ຄ້ານທາງກາຍໄດ້ໂດຍປະການທັງປວງ ຈຶ່ງສະຫງັດຈາກກາມ ແລະ ອະກຸສົນທຳທັງຫລາຍແລ້ວບັນລຸປະຖົມຊານທີ່ມີວິຕົກ ວິຈານ ປິຕິ ແລະ ສຸກອັນເກີດຈາກວິເວກຢູ່ ທ່ານຍ່ອມພິຈາລະນາເຫັນທຳທັງຫລາຍ ຄື ຮູບ ເວທະນາ ສັນຍາ ສັງຂານ ວິນຍານ ທີ່ມີຢູ່ໃນປະຖົມຊານນັ້ນໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນຄືພະຍາດ ເປັນຄືຫົວຝີ ເປັນຄືລູກສອນ ເປັນສິ່ງຖ້າກໍ່ຄວາມເດືອດຮ້ອນ ເປັນທີ່ເຮັດໃຫ້ຂັດຂ້ອງ ເປັນຄືຄົນຝ່າຍອື່ນ ເປັນສິ່ງທີ່ຕ້ອງແຕກສະຫຼາຍເປັນຂອງວ່າງເປົ່າ ເປັນອະນັດຕາ ທ່ານຍ່ອມເຮັດຈິດໃຫ້ກັບຈາກທຳເຫຼົ່ານັ້ນແລ້ວ ຈຶ່ງນ້ອມຈິດໄປເພື່ອອະມະຕະທາດວ່າ “ພາວະທີ່ສະງົບ ປະນີດ ຄື ຄວາມລະງັບສັງຂານທັງປວງ ຄວາມສະລະຄືນອຸປະທິກິເລດທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບ ນິບພານ” ທ່ານດຳລົງຢູ່ໃນປະຖົມຊານນັ້ນ ຍ່ອມບັນລຸຄວາມສິ້ນໄປແຫ່ງອາສະວະທັງຫລາຍ ຫາກຍັງບໍ່ບັນລຸຄວາມສິ້ນໄປແຫ່ງອາສະວະທັງຫລາຍ ກໍຈະເປັນໂອປະປາຕິກະ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ ດ້ວຍຄວາມຍິນດີເພີດເພີນໃນທຳນັ້ນ ຈັກປະຣິນິບພານໃນພົບນັ້ນບໍ່ຫວນກັບມາຈາກໂລກນັ້ນອີກ

ນີ້ແລ ເປັນມັກແລະປະຕິປະທາທີ່ເປັນໄປເພື່ອລະໂອຣຳພາຄິຍະສັງໂຍດ ໕ ປະການ

ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸຈຶ່ງບັນລຸທຸຕິຍະຊານ ฯລฯ ບັນລຸຕະຕິຍະຊານ ฯລฯ ບັນລຸຈະຕຸດຖະຊານ ฯລฯ ຢູ່ ທ່ານຍ່ອມພິຈາລະນາເຫັນທຳທັງ

ຫລາຍ ຄື ຮູບ ເວທະນາ ສັນຍາ ສັງຂານ ວິນຍານ ທີ່ມີຢູ່ໃນຈະຕຸດຖະຊານນັ້ນ ຯລຯ ເພື່ອ ລະໂອຣຳພາຄິຍະສັງໂຍດ ໕ ປະການ

## ອະຣູບປະຊານ ໔

ອີກປະການໜຶ່ງ ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາ ໂດຍປະການທັງປວງ ພິກຂຸບັນລຸອາກາສານັນຈາຍະຕະນະຊານ ໂດຍກຳນົດວ່າ "ອາກາດຫາບ່ອນສຸດບໍ່ໄດ້" ຢູ່ ທ່ານຍ່ອມພິຈາລະນາເຫັນທຳທັງຫລາຍ ຄື ເວທະນາ ສັນຍາ ສັງຂານ ວິນຍານ ທີ່ມີຢູ່ໃນອາກາສານັນຈາຍະຕະນະຊານນັ້ນໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນຄືພະຍາດ ເປັນຄືຫົວຝີ ເປັນຄືລູກສອນ ເປັນສິ່ງຖ້າກໍ່ຄວາມເດືອດຮ້ອນ ເປັນທີ່ເຮັດໃຫ້ຂັດຂ້ອງ ເປັນຄືຄົນຝ່າຍອື່ນ ເປັນສິ່ງທີ່ຕ້ອງແຕກສະຫຼາຍ ເປັນຂອງວ່າງເປົ່າ ເປັນອະນັດຕາ ທ່ານຍ່ອມເຮັດຈິດໃຫ້ກັບຈາກທຳເຫຼົ່ານັ້ນ ແລ້ວແລ້ວ ຈຶ່ງນ້ອມຈິດໄປເພື່ອ ອະມະຕະທາດວ່າ "ສະພາວະທີ່ສະງົບ ປະນີດ ຄື ຄວາມລະງັບສັງຂານທັງປວງ ຄວາມສະລະຄືນອຸປະທິກິເລດທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບ ນິບພານ" ທ່ານດຳລົງຢູ່ໃນອາກາສານັນຈາຍະຕະນະຊານນັ້ນ ຍ່ອມບັນລຸຄວາມສິ້ນໄປແຫ່ງອາສະວະທັງຫລາຍ ຫາກຍັງບໍ່ບັນລຸຄວາມສິ້ນໄປແຫ່ງອາສະວະທັງຫລາຍ ກໍຈະເປັນໂອປະປາຕິກະ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ ດ້ວຍຄວາມຍິນດີເພີດເພີນໃນທຳນັ້ນ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ

ນີ້ແລ ເປັນມັກແລະປະຕິປະທາທີ່ເປັນໄປເພື່ອລະໂອຣຳພາຄິຍະສັງໂຍດ ໕ ປະການ

ອີກປະການໜຶ່ງ ພິກຂຸລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານ ໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ຢູ່ ທ່ານຍ່ອມພິຈາລະນາເຫັນທຳທັງຫລາຍ ຄື ເວທະນາ ຯລຯ ທີ່ມີຢູ່ໃນວິນຍານັນຈາຍະຕະນະຊານນັ້ນ ຯລຯ ເພື່ອລະໂອຣຳພາຄິຍະສັງໂຍດ ໕ ປະການ

ອີກປະການໜຶ່ງ ພິກຂຸລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານ ໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ ທ່ານຍ່ອມພິຈາລະນາເຫັນທຳທັງຫລາຍ ຄື ເວທະນາ ສັນຍາ ສັງຂານ ວິນຍານທີ່ມີຢູ່ໃນອາກິນຈັນຍາຍະຕະນະຊານນັ້ນໂດຍເປັນສະພາວະບໍ່ທ່ຽງ ເປັນທຸກ ເປັນຄືພະຍາດ ເປັນຄືຫົວຝີ ເປັນຄືລູກສອນ ເປັນສິ່ງຖ້າກໍ່ຄວາມເດືອດຮ້ອນ ເປັນທີ່ເຮັດໃຫ້ຂັດຂ້ອງ ເປັນຄືຄົນຝ່າຍອື່ນ ເປັນສິ່ງທີ່ຕ້ອງແຕກສະຫຼາຍ ເປັນຂອງວ່າງເປົ່າ ເປັນອະນັດຕາ ທ່ານຍ່ອມເຮັດຈິດໃຫ້ກັບຈາກທຳເຫຼົ່ານັ້ນແລ້ວ ຈຶ່ງນ້ອມຈິດໄປເພື່ອອະມະຕະທາດວ່າ "ສະພາວະທີ່ສະງົບ ປະນີດ ຄື ຄວາມສະງົບລະງັບສັງຂານທັງປວງ ຄວາມສະ

ລະຄືນອຸປະທິກິເລດທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບ ນິບພານ" ທ່ານດຳລົງຢູ່ໃນອາກິນຈັນຍາຍະຕະນະຊານນັ້ນ ຍ່ອມບັນລຸຄວາມສິ້ນໄປແຫ່ງອາສະວະທັງຫລາຍ ຫາກຍັງບໍ່ບັນລຸຄວາມສິ້ນໄປແຫ່ງອາສະວະທັງຫລາຍ ກໍຈະເປັນໂອປະປາຕິກະ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ ດ້ວຍຄວາມຍິນດີເພີດເພີນ ໃນທຳນັ້ນ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ

ນີ້ແລ ເປັນມັກແລະປະຕິປະທາທີ່ເປັນໄປເພື່ອລະໂອຣຳພາຄິຍະສັງໂຍດ ໕ ປະການ"

ທ່ານພຣະອານົນທູນຖາມວ່າ "ຖ້າມັກ ແລະປະຕິປະທານີ້ ເປັນໄປເພື່ອລະໂອຣຳພາຄິຍະສັງໂຍດ ໕ ປະການ ເມື່ອເປັນເຊັ່ນນັ້ນ ຍ້ອນເຫດໃດ ພິກຂຸທັງຫລາຍໃນພຣະທຳວິໄນນີ້ ລາງພວກຈຶ່ງເປັນເຈໂຕວິມຸດ ລາງພວກຈຶ່ງເປັນປັນຍາວິມຸດນໍ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ໃນເລື້ອງນີ້ ເຮົາກ່າວວ່າພິກຂຸເຫຼົ່ານັ້ນ ມີອິນຊີຕ່າງກັນ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະອານົນມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະຫາມາລຸງກະຍະສູດທີ່ ໔ ຈົບ**

# ໕. ພັນທາລິສູດ

## ວ່າດ້ວຍພຣະພັນທາລິ

## ຄຸນແຫ່ງການສັນອາຫານຄາບດຽວ

[໑໓໔] ຂ້າພະເຈົ້າໄດ້ຟັງມາແບວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫລາຍມາຕັດວ່າ "ພິກຂຸທັງຫລາຍ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດ ວ່າ

"ພິກຂຸທັງຫລາຍ ເຮົາສັນອາຫານຄາບດຽວ ເຮົາເມື່ອສັນອາຫານຄາບດຽວ ຍ່ອມຮູ້ສຶກວ່າສຸກພາບມີໂຣຄາພາດໜ້ອຍ ເບົາຕົນໂຕ ມີພະລານາໄມສົມບູນ ຢູ່ສຸກສະບາຍ

ພິກຂຸທັງຫລາຍ ມາເທີ້ນ ແມ່ນທ່ານທັງຫລາຍກໍຈົ່ງສັນອາຫານຄາບດຽວເທີ້ນ ທ່ານທັງຫລາຍ ເມື່ອສັນອາຫານຄາບດຽວ ຈັກຮູ້ສຶກວ່າສຸກພາບມີໂຣຄາພາດໜ້ອຍ ເບົາຕົນໂຕ ມີພະລານາໄມ ສົມບູນ ຢູ່ສຸກສະບາຍ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະພັນທາລີໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ສາມາດສັນອາຫານຄາບດຽວໄດ້ ຍ້ອນເມື່ອຂ້າພຣະອົງສັນອາຫານຄາບດຽວ ຈະມີຄວາມກະວົນກະວາຍ ແລະ ມີຄວາມເດືອດຮ້ອນ"

"ພັນທາລີ ຖ້າເຊັ່ນນັ້ນ ທ່ານຮັບນິມົນໃນທີ່ໃດແລ້ວ ເພິ່ງສັນໃນບ່ອນນັ້ນເສຍສ່ວນໜຶ່ງແລ້ວນຳອີກສ່ວນໜຶ່ງມາສັນກໍໄດ້ ເມື່ອທ່ານສັນອາຫານໄດ້ຢ່າງນີ້ ກໍຈັກດຳລົງຊີວິດຢູ່ໄດ້"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ສາມາດຈະສັນແມ່ນດ້ວຍອາການແນວນັ້ນ ຍ້ອນເມື່ອຂ້າພຣະອົງສັນແນວນັ້ນ ກໍຈະມີຄວາມກະວົນກະວາຍ ແລະ ມີຄວາມເດືອດຮ້ອນ"

ຄັ້ງນັ້ນ ທ່ານພຣະພັນທາລີໄດ້ປະກາດຄວາມບໍ່ສາມາດໃນ (ການຖືຮັກສາ) ສິກຂາບົດທີ່ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ (ແລະ) ໃຫ້ພິກຂຸສົງສະມາທານສິກສາຢູ່ ຕັ້ງແຕ່ນັ້ນມາທ່ານພຣະພັນທາລີບໍ່ກ້າຜະເຊີນພຣະພັກພຣະຜູ້ມີພຣະພາກເຈົ້າຕະຫຼອດ ໓ ເດືອນເຕັມ ຄື ພິກຂຸຜູ້ບໍ່ພ່ຳເພັງສິກຂາໃນສາດສະໜາຂອງພຣະສາດສະດາໃຫ້ບໍລິບູນ

## ພຣະພັນທາລີສຳນຶກຜິດ

[໑໓໕] ສະໄໝນັ້ນ ພິກຂຸຈຳນວນຫຼາຍຊ່ອຍກັນເຮັດຈີວອນກຳ (ຫຍິບຈີວອນ) ສຳລັບພຣະຜູ້ມີພຣະພາກເຈົ້າດ້ວຍຕັ້ງໃຈວ່າ "ພຣະຜູ້ມີພຣະພາກເຈົ້າຈະຊົງໃຊ້ຈີວອນທີ່ເຮັດສຳເລັດແລ້ວ ສະເດັດທ່ຽວຈາຣິກໄປເປັນເວລາ ໓ ເດືອນ"

ເວລານັ້ນ ທ່ານພຣະພັນທາລີເຂົ້າໄປຫາພິກຂຸເຫຼົ່ານັ້ນຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພິກຂຸເຫຼົ່ານັ້ນໄດ້ກ່າວກັບທ່ານພຣະພັນທາລີ ວ່າ

"ທ່ານພັນທາລີ ພິກຂຸທັງຫລາຍຊ່ອຍກັນເຮັດຈີວອນກຳນີ້ສຳລັບພຣະຜູ້ມີພຣະພາກເຈົ້າດ້ວຍຕັ້ງໃຈວ່າ "ພຣະຜູ້ມີພຣະພາກເຈົ້າຈະຊົງໃຊ້ຈີວອນທີ່ເຮັດສຳເລັດແລ້ວ ສະເດັດທ່ຽວຈາຣິກ

ໄປເປັນ ເວລາ ໓ ເດືອນ" ທ່ານພັນທາລິ ເຮົາຂໍເຕືອນ ທ່ານຈົ່ງໃສ່ໃຈຄວາມຜິດນີ້ໄວ້ໃຫ້ດີເທີ້ນ ພາຍຫລັງ ທ່ານຢ່າໄດ້ກໍ່ຄວາມຫຍຸ້ງຍາກອີກເລີຍ"

ທ່ານພຣະພັນທາລິຮັບຄຳແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໂທດໄດ້ຄອບງຳຂ້າພຣະອົງຜູ້ເປັນຄົນໂງ່ ເປັນຄົນຫລົງ ບໍ່ສະຫຼາດ ຜູ້ປະກາດຄວາມບໍ່ສາມາດໃນ (ການຖືຮັກສາ) ສິກຂາບົດທີ່ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ (ແລະ) ໃຫ້ພິກຂຸສົງສະມາທານສຶກສາຢູ່ ຂໍພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້ໂທດຂອງຂ້າພຣະອົງນັ້ນໂດຍຄວາມເປັນໂທດ ເພື່ອຄວາມສັງລວມລະວັງຕໍ່ໄປເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖ້າຈັ່ງຊັ້ນ ພັນທາລິ ໂທດໄດ້ຄອບງຳທ່ານຜູ້ເປັນຄົນໂງ່ ເປັນຄົນຫລົງ ບໍ່ສະຫຼາດ ຜູ້ປະກາດຄວາມບໍ່ສາມາດໃນ (ການຖືຮັກສາ) ສິກຂາບົດທີ່ເຮົາບັນຍັດໄວ້ (ແລະ) ໃຫ້ພິກຂຸສົງສະມາທານສຶກສາຢູ່ ທ່ານບໍ່ໄດ້ເຂົ້າໃຈແມ່ນເຫດທີ່ວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນນະຄອນສາວັດຖີ ແມ່ນພຣະຜູ້ມີພຣະພາກເຈົ້າກໍຊົງຮູ້ຈັກເຮົາວ່າ "ພິກຂຸຊື່ພັນທາລິເປັນຜູ້ບໍ່ພ່ຳເພັງສິກຂາໃນສາດສະໜາຂອງພຣະສາດສະດາໃຫ້ບໍລິບູນ" ແມ່ນເຫດນີ້ທ່ານກໍບໍ່ໄດ້ເຂົ້າໃຈ

ທ່ານບໍ່ໄດ້ເຂົ້າໃຈແມ່ນເຫດທີ່ວ່າ ພິກຂຸຈຳນວນຫຼາຍເຂົ້າຈຳພັນສາຢູ່ໃນນະຄອນສາວັດຖີ ແມ່ນພິກຂຸເຫຼົ່ານັ້ນກໍຮູ້ຈັກເຮົາວ່າ "ພິກຂຸຊື່ພັນທາລິເປັນຜູ້ບໍ່ພ່ຳເພັງສິກຂາໃນສາດສະໜາຂອງພຣະສາດສະດາໃຫ້ບໍລິບູນ" ແມ່ນເຫດນີ້ທ່ານກໍບໍ່ໄດ້ເຂົ້າໃຈ

ທ່ານບໍ່ໄດ້ເຂົ້າໃຈແມ່ນເຫດທີ່ວ່າ ພິກຂຸນີຈຳນວນຫຼາຍເຂົ້າຈຳພັນສາຢູ່ໃນນະຄອນສາວັດຖີ ແມ່ນພິກຂຸນີເຫຼົ່ານັ້ນກໍຮູ້ຈັກເຮົາວ່າ "ພິກຂຸຊື່ພັນທາລິເປັນຜູ້ບໍ່ພ່ຳເພັງສິກຂາໃນສາດສະໜາຂອງ ພຣະສາດສະດາໃຫ້ບໍລິບູນ" ແມ່ນເຫດນີ້ທ່ານກໍບໍ່ໄດ້ເຂົ້າໃຈ

ທ່ານບໍ່ໄດ້ເຂົ້າໃຈແມ່ນເຫດທີ່ວ່າ ອຸປາສົກຈຳນວນຫຼາຍອາໄສຢູ່ໃນນະຄອນສາວັດຖີ ແມ່ນອຸປາສົກເຫຼົ່ານັ້ນ ກໍຮູ້ຈັກເຮົາວ່າ "ພິກຂຸຊື່ພັນທາລິເປັນຜູ້ບໍ່ພ່ຳເພັງສິກຂາໃນສາດສະໜາຂອງພຣະສາດສະດາ ໃຫ້ບໍລິບູນ" ແມ່ນເຫດນີ້ທ່ານກໍບໍ່ໄດ້ເຂົ້າໃຈ

ທ່ານບໍ່ໄດ້ເຂົ້າໃຈແມ່ນເຫດທີ່ວ່າ ອຸປາສິກາຈຳນວນຫຼາຍອາໄສຢູ່ໃນນະຄອນສາວັດຖີ ແມ່ນອຸປາສິກາເຫຼົ່ານັ້ນກໍຮູ້ຈັກເຮົາວ່າ "ພິກຂຸຊື່ພັນທາລິເປັນຜູ້ບໍ່ພ່ຳເພັງສິກຂາໃນສາດສະໜາຂອງພຣະສາດສະດາໃຫ້ບໍລິບູນ" ແມ່ນເຫດນີ້ທ່ານກໍບໍ່ໄດ້ເຂົ້າໃຈ

ພັນທາລິ ທ່ານບໍ່ໄດ້ເຂົ້າໃຈແມ່ນເຫດທີ່ວ່າ ສະມະນະພາມຕ່າງລັດທິຈຳນວນຫຼາຍເຂົ້າ

ຈຳພັນສາໃນນະຄອນສາວັດຖີ ແມ່ນສະມະນະພາມຕ່າງລັດທິເຫຼົ່ານັ້ນກໍຮູ້ຈັກເຮົາວ່າ "ພິກຂຸຊື່ ພັນທາລີ ສາວົກຂອງພຣະສະມະນະໂຄດົມ ເປັນພຣະເຖຣະຮູບໜຶ່ງ ຜູ້ບໍ່ພໍ່າເພັງສິກຂາໃນສາດສະໜາຂອງພຣະສາດສະດາໃຫ້ບໍລິບູນ" ແມ່ນເຫດນີ້ທ່ານກໍບໍ່ໄດ້ເຂົ້າໃຈ"

"ຂ້າແດ່ພຣະອົງຜູ້ຈະເລີນ ໂທດໄດ້ຄອບງຳຂ້າພຣະອົງຜູ້ເປັນຄົນໂງ່ ເປັນຄົນຫລົງບໍ່ສະຫຼາດ ຜູ້ປະກາດຄວາມບໍ່ສາມາດໃນ (ການຖືຮັກສາ) ສິກຂາບົດທີ່ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້(ແລະ)ໃຫ້ພິກຂຸສົງສະມາທານສຶກສາຢູ່ ຂໍພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້ໂທດຂອງຂ້າພຣະອົງໂດຍຄວາມເປັນໂທດ ເພື່ອຄວາມສັງລວມລະວັງຕໍ່ໄປເທີ້ນ ຂ້ານ້ອຍ"

"ພັນທາລີ ຖ້າຈັ່ງຊັ້ນ ໂທດໄດ້ຄອບງຳທ່ານຜູ້ເປັນຄົນໂງ່ ເປັນຄົນຫລົງ ບໍ່ສະຫຼາດ ຜູ້ປະກາດ ຄວາມບໍ່ສາມາດໃນ (ການຖືຮັກສາ) ສິກຂາບົດທີ່ເຮົາບັນຍັດໄວ້ (ແລະ) ໃຫ້ພິກຂຸສົງສະມາທານສຶກສາຢູ່

[໑໓໖] ພັນທາລີ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ພິກຂຸໃນທຳວິໄນນີ້ເປັນອຸພະໂຕພາຄະວິມຸດເຮົາຈະເພິ່ງກ່າວກັບພິກຂຸນັ້ນແນວນີ້ວ່າ "ມາເທີ້ນ ພິກຂຸ ເຮົາຈະກ້າວໄປໃນຫລົ່ມນຳກັນ ພິກຂຸນັ້ນຈະເພິ່ງກ້າວໄປ ຫຼື ນ້ອມກາຍໄປທາງອື່ນ ຫຼື ຈະເພິ່ງປະຕິເສດ"

"ບໍ່ປະຕິເສດ ຂ້ານ້ອຍ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ພິກຂຸໃນທຳວິໄນນີ້ເປັນປັນຍາວິມຸດ ເປັນກາຍະສັກຂີ ເປັນທິດຖິປັດຕະ ເປັນສັດທາວິມຸດ ເປັນທຳມານຸສາຣີ ເປັນສັດທານຸສາຣີກ ເຮົາຈະເພິ່ງກ່າວກັບພິກຂຸນັ້ນແນວນີ້ວ່າ "ມາເທີ້ນ ພິກຂຸ ເຮົາຈະກ້າວໄປໃນຫລົ່ມນຳກັນ" ພິກຂຸນັ້ນຈະເພິ່ງກ້າວໄປ ຫຼື ນ້ອມກາຍໄປທາງອື່ນ ຫຼື ຈະເພິ່ງປະຕິເສດ"

"ບໍ່ປະຕິເສດ ຂ້ານ້ອຍ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ເວລານັ້ນ ທ່ານເປັນອຸພະໂຕພາຄະວິມຸຕ ເປັນປັນຍາວິມຸດ ເປັນກາຍະສັກຂີ ເປັນທິດຖິປັດຕະ ເປັນສັດທາວິມຸດ ເປັນທຳມານຸສາຣີ ຫຼື ເປັນສັດທານຸສາຣີແດ່ບໍ?"

"ບໍ່ ຂ້ານ້ອຍ"

"ເວລານັ້ນ ທ່ານເປັນຄົນວ່າງ ຄົນເປົ່າ ຄົນຜິດ ແມ່ນບໍ?"

"ແມ່ນ ຂ້ານ້ອຍ ໂທດໄດ້ຄອບງຳຂ້າພຣະອົງຜູ້ເປັນຄົນໂງ່ ເປັນຄົນຫລົງ ບໍ່ສະຫຼາດ ຜູ້ປະກາດຄວາມບໍ່ສາມາດໃນ (ການຖືຮັກສາ) ສິກຂາບົດທີ່ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້

(ແລະ) ໃຫ້ພິກຂຸສົງສະມາທານສິກສາຢູ່ ຂໍພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້ໂທດຂອງຂ້າພຣະອົງໂດຍຄວາມເປັນໂທດ ເພື່ອຄວາມສັງລວມລະວັງຕໍ່ໄປເທີ້ນ ຂ້ານ້ອຍ"

"ພັນທາລີ ຖ້າຈັ່ງຊັ້ນ ໂທດໄດ້ຄອບງຳທ່ານຜູ້ເປັນຄົນໂງ່ ເປັນຄົນຫລົງ ບໍ່ສະຫຼາດ ຜູ້ປະກາດຄວາມບໍ່ສາມາດໃນ (ການຖືຮັກສາ) ສິກຂາບົດທີ່ເຮົາບັນຍັດໄວ້ (ແລະ) ໃຫ້ພິກຂຸສົງສະມາທານສິກສາຢູ່ ແຕ່ຍ້ອນທ່ານເຫັນໂທດໂດຍຄວາມເປັນໂທດແລ້ວເຮັດຄືນຕາມທຳ ເຮົາຈຶ່ງຮັບຮູ້ໂທດຂອງທ່ານນັ້ນ ການທີ່ບຸກຄົນເຫັນໂທດໂດຍຄວາມເປັນໂທດແລ້ວເຮັດຄືນຕາມທຳຈະສັງລວມລະວັງຕໍ່ໄປນີ້ ເປັນຄວາມຈະເລີນໃນອະຣິຍະວິໄນ

## ຜູ້ບໍ່ພ່ຳເພັງສິກຂາໃຫ້ບໍລິບູນ

[໑໓໗] ພັນທາລີ ພິກຂຸລາງອົງໃນທຳວິໄນນີ້ ເປັນຜູ້ບໍ່ພ່ຳເພັງສິກຂາໃນສາດສະໜາຂອງສາດສະດາໃຫ້ບໍລິບູນ ທ່ານມີຄວາມຄິດແນວນີ້ວ່າ "ທາງທີ່ດີ ເຮົາຄວນພັກຢູ່ທີ່ເສນາສະນະ ງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ຊອກເຂົາ ຖ້ຳ ປ່າຊ້າ ປ່າຊັດ ກາງແຈ້ງ ລອມຟາງເທີ້ນ ບາງເທື່ອເຮົາຈະເພິ່ງເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດ" ທ່ານພັກຢູ່ທີ່ເສນາສະນະງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ຊອກເຂົາ ຖ້ຳ ປ່າຊ້າ ປ່າຊັດ ກາງແຈ້ງ ລອມຟາງ ເມື່ອທ່ານຫລີກອອກໄປຢູ່ແນວນັ້ນ ສາດສະດາກໍຕິຕຽນໄດ້ ເພື່ອນພົມມະຈາຣີຜູ້ຮູ້ທັງຫລາຍພິຈາຣະນາແລ້ວກໍຕິຕຽນໄດ້ ເທວະດາກໍຕິຕຽນໄດ້ ແມ່ນຕົນເອງ ກໍຕິຕຽນຕົນເອງໄດ້ ທ່ານຖືກສາດສະດາຕິຕຽນແດ່ ຖືກເພື່ອນພົມມະຈາຣີຜູ້ຮູ້ທັງຫລາຍຕິຕຽນແດ່ ຖືກເທວະດາຕິຕຽນແດ່ ຕົນເອງຕິຕຽນຕົນເອງແດ່ ກໍບໍ່ເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດ ອັນສາມາດວິເສດຍິ່ງກວ່າທຳຂອງມະນຸດ ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນພິກຂຸນັ້ນເປັນຜູ້ບໍ່ພ່ຳເພັງສິກຂາໃນສາດສະໜາຂອງສາດສະດາໃຫ້ບໍລິບູນ

## ຜູ້ພ່ຳເພັງສິກຂາໃຫ້ບໍລິບູນ

[໑໓໘] ພັນທາລີ ສ່ວນພິກຂຸລາງອົງໃນທຳວິໄນນີ້ ເປັນຜູ້ພ່ຳເພັງສິກຂາໃນສາດສະໜາຂອງສາດສະດາໃຫ້ບໍລິບູນ ທ່ານມີຄວາມຄິດແນວນີ້ວ່າ "ທາງທີ່ດີ ເຮົາຄວນພັກຢູ່ທີ່ເສນາສະນະງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ຊອກເຂົາ ຖ້ຳ ປ່າຊ້າ ປ່າຊັດ ກາງແຈ້ງ ລອມຟາງ ບາງເທື່ອເຮົາຈະເພິ່ງເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດ" ທ່ານພັກຢູ່ທີ່ເສນາສະນະງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ຊອກເຂົາ ຖ້ຳ ປ່າຊ້າ ປ່າຊັດ ກາງແຈ້ງ ລອມຟາງ ເມື່ອທ່ານຫລີກອອກໄປຢູ່ແນວນັ້ນ ແມ່ນສາດສະດາກໍຕິຕຽນບໍ່ໄດ້ ແມ່ນເພື່ອນພົມມະຈາຣີຜູ້ຮູ້ທັງຫລາຍພິຈາຣະນາແລ້ວກໍຕິຕຽນບໍ່ໄດ້ ແມ່ນເທວະດາກໍຕິຕຽນບໍ່ໄດ້ ແມ່ນຕົນເອງກໍຕິຕຽນຕົນເອງບໍ່ໄດ້ ທ່ານອັນສາດສະດາບໍ່ຕິຕຽນ ເພື່ອນພົມມະຈາຣີຜູ້ຮູ້ທັງຫລາຍ

ພິຈາຣະນາແລ້ວກໍບໍ່ຕິດຢູ່ ເທວະດາບໍ່ຕິດຢູ່ ຕົນເອງຕິດຢູ່ນຕົນເອງບໍ່ໄດ້ ຍ່ອມເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດ ພິກຂຸນັ້ນສະຫງັດຈາກການແລະອະກຸສົນທຳທັງຫລາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່

ຂໍ້ນັ້ນຍ້ອນເຫດໃດ

ຍ້ອນພິກຂຸນັ້ນ ເປັນຜູ້ພ່ຳເພັງສິກຂາໃນສາດສະໜາຂອງສາດສະດາໃຫ້ບໍລິບູນ

[໑໓໙] ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່

ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນພິກຂຸນັ້ນ ເປັນຜູ້ພ່ຳເພັງສິກຂາໃນສາດສະໜາຂອງສາດສະດາໃຫ້ບໍລິບູນ

ອີກປະການໜຶ່ງ ຍ້ອນປີຕິຈາງຄາຍອອກ ພິກຂຸບັນລຸຕະຕິຍະຊານ ຯລຯ ຢູ່

ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນພິກຂຸນັ້ນເປັນຜູ້ພ່ຳເພັງສິກຂາໃນສາດສະໜາຂອງສາດສະດາໃຫ້ບໍລິບູນ

ອີກປະການໜຶ່ງ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນ ພິກຂຸບັນລຸຈະຕຸດຖະຊານ ຯລຯ ຢູ່

ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນພິກຂຸນັ້ນ ເປັນຜູ້ພ່ຳເພັງສິກຂາໃນສາດສະໜາຂອງສາດສະດາໃຫ້ບໍລິບູນ

## **ວິດຊາ ໑**

ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປເພື່ອປຸບເພນິວາສານຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ຯລຯ໘ ທ່ານຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້

ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນພິກຂຸນັ້ນ ເປັນຜູ້ພ່ຳເພັງສິກຂາໃນສາດສະໜາຂອງສາດສະດາໃຫ້ບໍລິບູນ

ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນປາສະຈາກຄວາມເສົ້າໝອງ

ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແບບນີ້ ພິກຂຸນັ້ນນ້ອມຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມ ແລະ ບໍ່ງາມ ເກີດດີ ແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບກາຍທຸດຈະຣິດ ฯລฯ ຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ໝູ່ສັດທີ່ປະກອບກາຍສຸດຈະຣິດ ฯລฯ ຈະໄປເກີດໃນສຸຄະຕິໂລກສະຫວັນ" ທ່ານເຫັນໝູ່ສັດ ຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແບບນີ້ແລ

ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນພິກຂຸນັ້ນ ເປັນຜູ້ພ່ຳເພັງສິກຂາໃນສາດສະໜາຂອງສາດສະດາໃຫ້ບໍລິບູນ

ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັງເນີນປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແບບນີ້ ພິກຂຸນັ້ນນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣດ ນີ້ທຸກຂະນິໂຣດຄາມິນີປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸໄທ ນີ້ອາສະວະນິໂຣດ ນີ້ອາສະວະນິໂຣດຄາມິນີ-ປະຕິປະທາ" ເມື່ອທ່ານຮູ້ເຫັນຢູ່ແບບນີ້ ຈິດຍ່ອມລຸດພົ້ນຈາກກາມາສະຫວະ ພະວາດະວະ ແລະ ອະວິດຊາສະຫວະ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບ ພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ໘ ບໍ່ມີກິດອື່ນເພື່ອຄວາມເປັນແບບນີ້ອີກຕໍ່ໄປ"

ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນພິກຂຸນັ້ນ ເປັນຜູ້ພ່ຳເພັງສິກຂາໃນສາດສະໜາຂອງສາດສະດາໃຫ້ບໍລິບູນ

## ເຫດທີ່ເຮັດໃຫ້ຖືກຂົ່ມຂີ່ແລະບໍ່ຖືກຂົ່ມຂີ່

[໑໔໐] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແບບນີ້ແລ້ວ ທ່ານພຣະພັນທາລິໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ພິກຂຸທັງຫລາຍມັກຂົ່ມຂີ່ພິກຂຸລາງອົງໃນພຣະທຳວິໄນນີ້ ເຮັດໃຫ້ເປັນເຫດ (ແຫ່ງອະທິກອນ) ອັນໜຶ່ງ ອັນໃດນໍ ເປັນເຫດເປັນປັດໄຈບໍ່ໃຫ້ພິກຂຸທັງຫລາຍມັກຂົ່ມຂີ່ພິກຂຸລາງອົງໃນພຣະທຳວິໄນນີ້ ເຮັດໃຫ້ເປັນເຫດ (ແຫ່ງອະທິກອນ) ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພັນທາລິ ພິກຂຸລາງອົງໃນທຳວິໄນນີ້ເປັນຜູ້ຕ້ອງອາບັດຢູ່ເນືອງ ໆ ເປັນຜູ້ມີອາບັດຫຼາຍ ທ່ານຖືກພິກຂຸທັງຫລາຍຕັກເຕືອນຢູ່ ກໍຍັງຝ່າຝືນປະພຶດນອກລູ່ນ

ອີກທາງ ນຳຄຳເວົ້າພາຍນອກມາປົກປິດ ສະແດງຄວາມຄຽດ ຄວາມຂັດເຄືອງ ແລະຄວາມບໍ່ອ່ອນນ້ອມໃຫ້ຜາກົດ ບໍ່ປະພຶດຊອບ ບໍ່ຢ້ານກົວ ບໍ່ຍອມຖອນຕົນອອກ ບໍ່ກ່າວວ່າ "ຂ້າພະເຈົ້າຈະເຮັດຕາມຄວາມພໍໃຈຂອງສົງ" ຍ້ອນເຫດທີ່ພິກຂຸເປັນຜູ້ວ່າຍາກນັ້ນ ພິກຂຸທັງຫລາຍຈຶ່ງເວົ້າແນວນີ້ວ່າ "ທ່ານຜູ້ມີອາຍຸທັງຫລາຍ ພິກຂຸນີ້ຕ້ອງອາບັດເນືອງ ໆ ເປັນຜູ້ມີອາບັດຫຼາຍ ທ່ານຖືກພິກຂຸທັງຫລາຍຕັກເຕືອນຢູ່ ກໍຍັງຝ່າຝືນປະພຶດນອກລູ່ນອີກທາງ ນຳຄຳເວົ້າພາຍນອກມາປົກປິດ ສະແດງຄວາມຄຽດ ຄວາມຂັດເຄືອງ ແລະຄວາມບໍ່ອ່ອນນ້ອມໃຫ້ຜາກົດ ບໍ່ປະພຶດຊອບ ບໍ່ຢ້ານກົວ ບໍ່ຍອມຖອນຕົນອອກ ບໍ່ກ່າວວ່າ "ຂ້າພະເຈົ້າຈະເຮັດຕາມຄວາມພໍໃຈຂອງສົງ" ເປັນການຊອບທີ່ທ່ານຜູ້ມີອາຍຸທັງຫລາຍຈະພິຈາລະນາໂທດຂອງພິກຂຸນີ້ ໂດຍບໍ່ໃຫ້ອະທິກອນລະງັບໄປໂດຍໄວ"

ພັນທາລີ ພິກຂຸທັງຫລາຍຈຶ່ງພິຈາລະນາໂທດຂອງພິກຂຸນັ້ນ ໂດຍບໍ່ໃຫ້ອະທິກອນນີ້ລະງັບໄປໂດຍໄວ ດ້ວຍອາການແນວນີ້

[໑໘໑] ພັນທາລີ ສ່ວນພິກຂຸລາງອົງໃນທຳວິໄນນີ້ ຕ້ອງອາບັດເນືອງ ໆ ເປັນຜູ້ມີອາບັດຫຼາຍ ທ່ານຖືກພິກຂຸທັງຫລາຍຕັກເຕືອນຢູ່ ກໍບໍ່ຝ່າຝືນປະພຶດນອກລູ່ນອີກທາງ ບໍ່ນຳຄຳເວົ້າພາຍນອກມາປົກປິດ ບໍ່ສະແດງຄວາມຄຽດ ຄວາມຂັດເຄືອງ ແລະຄວາມບໍ່ອ່ອນນ້ອມໃຫ້ຜາກົດປະພຶດຊອບ ຢ້ານກົວ ຍອມຖອນຕົນອອກ ກ່າວວ່າ "ຂ້າພະເຈົ້າ ຈະເຮັດຕາມຄວາມພໍໃຈຂອງສົງ" ຍ້ອນເຫດທີ່ພິກຂຸເປັນຜູ້ວ່າງ່າຍນັ້ນ ພິກຂຸທັງຫລາຍ ຈຶ່ງເວົ້າແນວນີ້ວ່າ "ທ່ານຜູ້ມີອາຍຸທັງຫລາຍ ພິກຂຸນີ້ຕ້ອງອາບັດເນືອງ ໆ ເປັນຜູ້ມີອາບັດຫຼາຍ ທ່ານຖືກພິກຂຸທັງຫລາຍຕັກເຕືອນຢູ່ ກໍບໍ່ຝ່າຝືນປະພຶດນອກລູ່ນອີກທາງ ບໍ່ນຳຄຳເວົ້າພາຍນອກມາປົກປິດ ບໍ່ສະແດງຄວາມຄຽດ ຄວາມຂັດເຄືອງ ແລະຄວາມບໍ່ອ່ອນນ້ອມ ໃຫ້ຜາກົດ ປະພຶດຊອບ ຢ້ານກົວ ຖອນຕົນອອກ ກ່າວວ່າ "ຂ້າພະເຈົ້າຈະເຮັດຕາມ ຄວາມພໍໃຈຂອງສົງ" ເປັນການຊອບແລ້ວ ຂໍທ່ານຜູ້ມີອາຍຸທັງຫລາຍຈຶ່ງພິຈາລະນາໂທດຂອງພິກຂຸນັ້ນ ໂດຍໃຫ້ອະທິກອນນີ້ລະງັບໄປໂດຍໄວ"

ພັນທາລີ ພິກຂຸທັງຫລາຍຈຶ່ງພິຈາລະນາໂທດຂອງພິກຂຸນັ້ນ ໂດຍໃຫ້ອະທິກອນນີ້ລະງັບໄປ ໂດຍໄວ ດ້ວຍອາການແນວນີ້

[໑໘໒] ພັນທາລີ ພິກຂຸລາງອົງໃນທຳວິໄນນີ້ ຕ້ອງອາບັດເປັນບາງເທື່ອ ບໍ່ມີອາບັດຫຼາຍ ທ່ານຖືກພິກຂຸທັງຫລາຍຕັກເຕືອນຢູ່ ກໍຍັງຝ່າຝືນປະພຶດນອກລູ່ນອີກທາງ ນຳຄຳເວົ້າພາຍນອກມາປົກປິດ ສະແດງຄວາມຄຽດ ຄວາມຂັດເຄືອງ ແລະ ຄວາມບໍ່ອ່ອນນ້ອມໃຫ້ຜາກົດ ບໍ່ປະພຶດຊອບ ບໍ່ຢ້ານກົວ ບໍ່ຍອມຖອນຕົນອອກ ບໍ່ກ່າວວ່າ "ຂ້າພະເຈົ້າຈະເຮັດຕາມຄວາມພໍໃຈຂອງສົງ" ຍ້ອນເຫດທີ່ພິກຂຸເປັນຜູ້ວ່າຍາກນັ້ນ ພິກຂຸທັງຫລາຍຈຶ່ງເວົ້າແນວນີ້ວ່າ "ທ່ານຜູ້ມີອາຍຸທັງຫລາຍ ພິກຂຸນີ້ຕ້ອງອາບັດເປັນບາງເທື່ອ ບໍ່ມີອາບັດຫຼາຍ ທ່ານຖືກພິກຂຸທັງຫລາຍຕັກເຕືອນຢູ່ ກໍຍັງຝ່າຝືນປະພຶດນອກລູ່ ນອກທາງ ນຳຄຳເວົ້າພາຍນອກມາປົກປິດ ສະແດງຄວາມຄຽດ ຄວາມ

ຂັດເຄືອງ ແລະຄວາມບໍ່ອ່ອນນ້ອມໃຫ້ຜາກົດ ບໍ່ປະພຶດຊອບ ບໍ່ຢ້ານກົວ ບໍ່ຍອມຖອນ ຕົນອອກ ບໍ່ກ່າວວ່າ "ຂ້າພະເຈົ້າຈະເຮັດຕາມຄວາມພໍໃຈຂອງສົງ" ເປັນການຊອບທີ່ທ່ານຜູ້ມີອາຍຸທັງຫລາຍ ຈະພິຈາລະນາໂທດຂອງພິກຂຸນີ້ ໂດຍບໍ່ໃຫ້ອະທິກອນລະງັບໄປໂດຍໄວ"

ພັນທາລີ ພິກຂຸທັງຫລາຍຈຶ່ງພິຈາລະນາໂທດຂອງພິກຂຸນັ້ນ ໂດຍບໍ່ໃຫ້ອະທິກອນລະງັບ ໄປໂດຍໄວ ດ້ວຍອາການແບບນີ້

[໑໔໓] ພັນທາລີ ສ່ວນພິກຂຸລາງອົງໃນທຳວິໄນນີ້ ຕ້ອງອາບັດເປັນບາງເທື່ອ ບໍ່ມີອາບັດ ຫຼາຍ ທ່ານຖືກພິກຂຸທັງຫລາຍຕັກເຕືອນຢູ່ ກໍບໍ່ຝ່າຝືນປະພຶດນອກລູ່ນອກທາງ ບໍ່ນຳຄຳເວົ້າພາຍ ນອກມາປົກປິດ ບໍ່ສະແດງຄວາມຄຽດ ຄວາມຂັດເຄືອງ ແລະຄວາມບໍ່ອ່ອນນ້ອມໃຫ້ຜາກົດ ປະ ພຶດຊອບ ຢ້ານກົວ ຍອມຖອນຕົນອອກ ກ່າວວ່າ "ຂ້າພະເຈົ້າຈະເຮັດຕາມຄວາມພໍໃຈຂອງສົງ" ຍ້ອນເຫດທີ່ພິກຂຸເປັນຜູ້ວ່າງ່າຍນັ້ນ ພິກຂຸ ທັງຫລາຍຈຶ່ງເວົ້າແບບນີ້ວ່າ "ທ່ານຜູ້ມີອາຍຸທັງຫລາຍ ພິກຂຸນີ້ຕ້ອງອາບັດເປັນບາງເທື່ອ ບໍ່ມີອາບັດຫຼາຍ ທ່ານຖືກພິກຂຸທັງຫລາຍຕັກເຕືອນຢູ່ ກໍບໍ່ ຝ່າຝືນປະພຶດນອກລູ່ນອກທາງ ບໍ່ນຳຄຳເວົ້າພາຍນອກມາປົກປິດ ບໍ່ສະແດງຄວາມຄຽດ ຄວາມ ຂັດເຄືອງ ແລະ ຄວາມບໍ່ອ່ອນນ້ອມໃຫ້ຜາກົດ ປະພຶດຊອບ ຢ້ານກົວ ຖອນຕົນອອກ ກ່າວວ່າ "ຂ້າພະເຈົ້າ ຈະເຮັດຕາມຄວາມພໍໃຈຂອງສົງ" ເປັນການສົມຄວນແລ້ວ ຂໍທ່ານຜູ້ມີອາຍຸທັງ ຫລາຍຈົ່ງພິຈາລະນາໂທດຂອງພິກຂຸນີ້ ໂດຍໃຫ້ອະທິກອນນີ້ລະງັບໄປໂດຍໄວ"

ພັນທາລີ ພິກຂຸທັງຫລາຍຈຶ່ງພິຈາລະນາໂທດຂອງພິກຂຸນັ້ນ ໂດຍໃຫ້ອະທິກອນນີ້ລະງັບ ໄປໂດຍໄວ ດ້ວຍອາການແບບນີ້

[໑໔໔] ພັນທາລີ ພິກຂຸລາງອົງໃນທຳວິໄນນີ້ ດຳເນີນຊີວິດດ້ວຍສັດທາພໍປະມານ ດ້ວຍ ຄວາມຮັກພໍປະມານ ຍ້ອນເຫດທີ່ພິກຂຸເປັນຜູ້ດຳເນີນຊີວິດດ້ວຍສັດທາພໍປະມານ ດ້ວຍຄວາມຮັກ ພໍປະມານນັ້ນ ພິກຂຸທັງຫລາຍຈຶ່ງເວົ້າແບບນີ້ວ່າ "ທ່ານຜູ້ມີອາຍຸທັງຫລາຍ ພິກຂຸນີ້ດຳເນີນຊີວິດ ດ້ວຍສັດທາພໍປະມານ ດ້ວຍຄວາມຮັກພໍປະມານ ຖ້າເຮົາທັງຫລາຍ ຈັກຂົ່ມຂີ່ພິກຂຸນີ້ ເຮັດໃຫ້ ເປັນເຫດ (ແຫ່ງອະທິກອນ) ດ້ວຍຕັ້ງໃຈວ່າ "ສັດທາພໍປະມານຄວາມຮັກພໍປະມານຂອງທ່ານນັ້ນ ຢ່າໄດ້ເສື່ອມໄປຈາກທ່ານເລີຍ"

ບຸກຄົນຜູ້ເປັນມິດອຳມາດ ຍາດສາໂລຫິດຂອງບຸຣຸດຜູ້ມີໜ່ວຍຕາຂ້າງດຽວ ເພິ່ງຖືຮັກສາ ໜ່ວຍຕາຂ້າງດຽວນັ້ນໄວ້ດ້ວຍຕັ້ງໃຈວ່າ "ໜ່ວຍຕາຂ້າງດຽວຂອງເຂົານັ້ນ ຢ່າໄດ້ເສື່ອມໄປຈາກ ເຂົາເລີຍ" ແມ່ນສັນໃດ ພິກຂຸລາງອົງໃນທຳວິໄນນີ້ກໍສັນນັ້ນຄືກັນ ດຳເນີນຊີວິດດ້ວຍສັດທາພໍ ປະມານ ດ້ວຍຄວາມຮັກພໍປະມານ ຍ້ອນເຫດທີ່ພິກຂຸເປັນຜູ້ດຳເນີນຊີວິດດ້ວຍສັດທາພໍປະມານ ດ້ວຍຄວາມຮັກພໍປະມານນັ້ນ ພິກຂຸທັງຫລາຍຈຶ່ງເວົ້າ ແບບນີ້ວ່າ "ທ່ານຜູ້ມີອາຍຸທັງຫລາຍ ພິກຂຸ ນີ້ດຳເນີນຊີວິດດ້ວຍສັດທາພໍປະມານ ດ້ວຍຄວາມຮັກ ພໍປະມານ ຖ້າເຮົາທັງຫລາຍຈັກຂົ່ມຂີ່ພິກ

ຊຸນີ້ ເຮັດໃຫ້ເປັນເຫດ (ແຫ່ງອະທິກອນ) ສັດທາພໍປະມານ ຄວາມຮັກພໍປະມານຂອງທ່ານ ຢ່າໄດ້ເສື່ອມໄປຈາກທ່ານເລີຍ"

ພັນທາລິ ນີ້ແລ ເປັນເຫດເປັນປັດໄຈໃຫ້ພິກຂຸທັງຫລາຍຂົ່ມຂີ່ພິກຂຸລາງອົງໃນທຳວິໄນນີ້ ແລ້ວເຮັດໃຫ້ເປັນເຫດ (ແຫ່ງອະທິກອນ) ອັນໜຶ່ງ ນີ້ເປັນເຫດ ເປັນປັດໄຈໃຫ້ພິກຂຸທັງຫລາຍຂົ່ມຂີ່ພິກຂຸລາງອົງໃນທຳວິໄນນີ້ ແລ້ວເຮັດໃຫ້ເປັນເຫດ (ແຫ່ງອະທິກອນ)"

## ອາສະວັດຖານິຍະທຳ

[໑໔໕] ທ່ານພຣະພັນທາລິທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈທີ່ແຕ່ກ່ອນສິກຂາບົດມີພຽງເລັກນ້ອຍ ແຕ່ພິກຂຸຈຳນວນຫຼາຍດຳລົງຢູ່ໃນອະຣະຫັດຕະຜົນ ອັນໜຶ່ງ ອັນໃດນໍ ເປັນເຫດເປັນປັດໄຈທີ່ບັດນີ້ສິກຂາບົດມີເປັນຈຳນວນຫລາຍ ແຕ່ພິກຂຸຈຳນວນໜ້ອຍດຳລົງຢູ່ໃນອະຣະຫັດຕະຜົນ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພັນທາລິ ຂໍ້ນີ້ເປັນຈິງແນວນັ້ນ ເມື່ອສັດທັງຫລາຍກຳລັງຈະເສື່ອມ ເມື່ອສັດທຳອກຳລັງຈະອັນຕະຣະທານ ສິກຂາບົດມີຢູ່ເປັນຈຳນວນຫລາຍ ແຕ່ພິກຂຸ ຈຳນວນໜ້ອຍດຳລົງຢູ່ໃນອະຣະຫັດຕະຜົນ ສາດສະດາຈະຍັງບໍ່ບັນຍັດສິກຂາບົດແກ່ສາວົກທັງຫລາຍ ຕະຫຼອດເວລາທີ່ຍັງບໍ່ເກີດອາສະວັດຖານິຍະທຳບາງຢ່າງໃນສົງ ເມື່ອເກີດອາສະວັດຖານິຍະທຳບາງຢ່າງໃນສົງ ສາດສະດາຈຶ່ງຈະບັນຍັດສິກຂາບົດແກ່ສາວົກທັງຫລາຍ ເພື່ອກຳຈັດອາດວັດຖານິຍະທຳເຫຼົ່ານັ້ນ

ອາສະວັດຖານິຍະທຳບາງຢ່າງຍັງບໍ່ເກີດໃນສົງ ຕາບທໍ່ທີ່ສົງຍັງບໍ່ເປັນໝູ່ໃຫຍ່ ເມື່ອສົງເປັນໝູ່ໃຫຍ່ ອາສະວັດຖານິຍະທຳບາງຢ່າງຈຶ່ງເກີດໃນສົງ ສາດສະດາຈະບັນຍັດສິກຂາບົດແກ່ສາວົກທັງຫລາຍ ເພື່ອກຳຈັດອາສະວັດຖານິຍະທຳເຫຼົ່ານັ້ນ

ອາສະວັດຖານິຍະທຳບາງຢ່າງຍັງບໍ່ເກີດໃນສົງ ຕາບທໍ່ທີ່ສົງຍັງບໍ່ເປັນຜູ້ເລີດດ້ວຍລາບ ຯລຯ ຍັງບໍ່ເປັນຜູ້ເລີດດ້ວຍຍົດ ຯລຯ ຍັງບໍ່ເປັນພະຫູສູດ ຯລຯ

ອາສະວັດຖານິຍະທຳບາງຢ່າງຍັງບໍ່ເກີດໃນສົງ ຕາບທໍ່ທີ່ສົງຍັງບໍ່ເປັນຣັດຕັນຍູ ເມື່ອສົງເປັນຣັດຕັນຍູ ອາສະວັດຖານິຍະທຳບາງຢ່າງຈຶ່ງເກີດໃນສົງ ສາດສະດາຈະບັນຍັດ ສິກຂາບົດແກ່ສາວົກທັງຫລາຍ ເພື່ອກຳຈັດອາສະວັດຖານິຍະທຳເຫຼົ່ານັ້ນ

[໑໔໖] ພັນທາລິ ສະໄໝໃດ ເຮົາສະແດງທຳບັນລະຍາຍປຽບດ້ວຍມ້າອາຊາໄນໜຸ່ມ ແກ່ທ່ານທັງຫລາຍ ສະໄໝນັ້ນ ທ່ານທັງຫລາຍຍັງມີຈຳນວນໜ້ອຍ ພັນທາລິ ທ່ານຍັງຣະນຶກເຖິງທຳບັນລະຍາຍນັ້ນ ໄດ້ຢູ່ບໍ?"

"ບໍ່ໄດ້ ຂ້ານ້ອຍ"

"ໃນການຣະນຶກບໍ່ໄດ້ນັ້ນ ທ່ານອາໄສເຫດອັນໃດນໍ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນຂ້າພຣະອົງບໍ່ໄດ້ພ່ຳເພັງສິກຂາໃນສາດສະໜາຂອງພຣະສາດສະດາໃຫ້ບໍລິບູນເປັນເວລາດົນມາແລ້ວ ຂ້ານ້ອຍ"

"ພັນທາລີ ຄວາມເປັນຜູ້ບໍ່ພ່ຳເພັງສິກຂາໃຫ້ບໍລິບູນນີ້ ຈະເປັນເຫດເປັນປັດໄຈ ກໍເປັນໄປບໍ່ໄດ້ ແຕ່ເຮົາກຳນົດຮູ້ດ້ວຍຈິດຈຶ່ງຮູ້ຈັກທ່ານມາດົນແລ້ວວ່າ "ເມື່ອເຮົາສະແດງທຳຢູ່ ໂມຄະບຸຣຸດນີ້ບໍ່ຕັ້ງໃຈ ບໍ່ໃສ່ໃຈ ບໍ່ເອົາໃຈຈົດຈໍ່ ບໍ່ງຽງໂສດສະດັບທຳ" ແຕ່ເຮົາກໍຈັກສະແດງທຳບັນລະຍາຍປຽບທຽບດ້ວຍມ້າອາຊາໄນໜຸ່ມແກ່ທ່ານອີກ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ທ່ານພຣະພັນທາລິທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

## ອົງຄຸນຂອງພິກຂຸຜູ້ເປັນເນື້ອນາບຸນ

[໑໔໗] "ພັນທາລີ ປຽບຄື ຄົນເຝິກມ້າຜູ້ຊ່ຽວຊານ ໄດ້ມ້າອາຊາໄນພັນດີແລ້ວ ຄັ້ງໃນເບື້ອງຕົ້ນເຝິກໃຫ້ມັນຮູ້ເລື້ອງໃນການໃສ່ບັງຫຽນ ເມື່ອເຂົາກຳລັງເຝິກໃຫ້ມັນຮູ້ເລື້ອງໃນການ ໃສ່ບັງຫຽນ ມັນກໍພະຍົດ ສະບັດ ດີ້ນຮົນ ແນວໃດແນວໜຶ່ງ ຄື ມ້າທີ່ຍັງບໍ່ເຄີຍ ເຝິກ ມ້ານັ້ນໝົດພະຍົດໄດ້ຍ້ອນໄດ້ຮັບການເຝິກຢູ່ປະຈຳ ໆ ຍ້ອນໄດ້ຮັບການເຝິກຕາມຂັ້ນຕອນໂດຍ ລຳດັບ ເມື່ອມ້າອາຊາໄນພັນດີໝົດພົຍສລົງໄດ້ ຍ້ອນໄດ້ຮັບການເຝິກຢູ່ປະຈຳ ໆ ຍ້ອນໄດ້ຮັບການເຝິກຕາມຂັ້ນຕອນໂດຍລຳດັບ ຄົນເຝິກມ້າກໍຈະເຝິກໃຫ້ມັນຮູ້ເລື້ອງອື່ນຕໍ່ໄປອີກ ເຊັ່ນເຝິກທຽມແອກ ເມື່ອເຂົາກຳລັງເຝິກໃຫ້ມັນຮູ້ເລື້ອງໃນການທຽມແອກ ມັນກໍຈະພະຍົດ ສະບັດ ດີ້ນຮົນ ແນວໃດແນວໜຶ່ງ ຄືມ້າທີ່ບໍ່ເຄີຍເຝິກ ມ້ານັ້ນໝົດພົຍສລົງໄດ້ຍ້ອນໄດ້ຮັບການເຝິກ ຢູ່ປະຈຳ ໆ ຍ້ອນໄດ້ຮັບການເຝິກຕາມຂັ້ນຕອນໂດຍລຳດັບ ມ້າອາຊາໄນພັນດີໝົດພົຍສລົງໄດ້ຍ້ອນໄດ້ຮັບການເຝິກຢູ່ປະຈຳ ໆ ຍ້ອນໄດ້ຮັບການເຝິກຕາມຂັ້ນຕອນໂດຍລຳດັບ ຄົນເຝິກມ້າກໍຈະເຝິກໃຫ້ມັນຮູ້ເລື້ອງອື່ນຕໍ່ໄປອີກ ຄື

໑. ການເຫຍາະກ້າວ
໒. ການຮອດກີບ
໓. ການໃຊ້ສຽງຮ້ອງໃຫ້ເປັນປະໂຫຍດ
໔. ຄວາມເປັນວົງພະຍາມ້າ
໕. ການເປັນມ້າຊັ້ນເລີດ
໖. ການແລ່ນເປັນວົງມົນ
໗. ການແລ່ນ
໘. ຄຸນສົມບັດໄດ້ເປັນຣາຊະນິຍົມ
໙. ຄວາມວ່ອງໄວຊັ້ນເລີດ
໑໐. ການເປັນມ້າທີ່ຄວນແກ່ການຊົມເຊີຍຢ່າງຍິ່ງ

ເມື່ອຄົນເຝິກມ້າເຝິກໃຫ້ມັນຮູ້ເລື້ອງໃນຄວາມວ່ອງໄວຊັ້ນເລີດ ໃນການເປັນມ້າຊັ້ນເລີດ ໃນການເປັນມ້າຄວນແກ່ການຊົມເຊີຍຢ່າງຍິ່ງ ມ້ານັ້ນກໍຈະພະຍົດ ສະບັດ ດີ້ນຮົນ ແນວໃດແນວໜຶ່ງ ຄືມ້າທີ່ຍັງບໍ່ເຄີຍເຝິກ ມ້ານັ້ນໝົດພິຍສລົງໄດ້ຍ້ອນໄດ້ຮັບການເຝິກຢູ່ ເລື້ອຍ ໆ ຍ້ອນໄດ້ຮັບການເຝິກຕາມຂັ້ນຕອນໂດຍລຳດັບ ໃນການຂີ່ມ້າອາຊາໄນພັນດີເຊິ່ງໝົດພິຍສລົງນັ້ນ ຄົນເຝິກມ້າກໍຈະເພີ່ມການເຝິກໃຫ້ມີຄຸນພາບ ໃຫ້ມີກຳລັງຂຶ້ນ ມ້າອາຊາໄນພັນດີປະກອບດ້ວຍອົງ ໑໐ ປະການນີ້ແລ ຈຶ່ງເປັນມ້າຄວນແກ່ພຣະຣາຊາ ເປັນມ້າຕົ້ນ ນັບວ່າເປັນຣາດຊະພາຫະນະໂດຍແທ້ ແມ່ນສັນໃດ

ພິກຂຸຜູ້ປະກອບດ້ວຍທຳ ໑໐ ປະການ ກໍສັນນັ້ນຄືກັນ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກສິນາ ຄວນແກ່ການທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ທຳ ໑໐ ປະການ ອັນໃດແດ່
ຄື ພິກຂຸໃນທຳວິໄນນີ້

໑. ເປັນຜູ້ປະກອບດ້ວຍສຳມາ ທິດຖິ ອັນເປັນອະເສຂະ
໒. ເປັນຜູ້ປະກອບດ້ວຍສຳມາ ສັງກັບປະ ອັນເປັນອະເສຂະ
໓. ເປັນຜູ້ປະກອບດ້ວຍສຳມາ ວາຈາ ອັນເປັນອະເສຂະ
໔. ເປັນຜູ້ປະກອບດ້ວຍສຳມາ ກຳມັນຕະ ອັນເປັນອະເສຂະ
໕. ເປັນຜູ້ປະກອບດ້ວຍສຳມາ ອາຊີວະ ອັນເປັນອະເສຂະ
໖. ເປັນຜູ້ປະກອບດ້ວຍສຳມາ ວາຍາມະ ອັນເປັນອະເສຂະ
໗. ເປັນຜູ້ປະກອບດ້ວຍສຳມາ ສະຕິ ອັນເປັນອະເສຂະ
໘. ເປັນຜູ້ປະກອບດ້ວຍສຳມາ ສະມາທິ ອັນເປັນອະເສຂະ
໙. ເປັນຜູ້ປະກອບດ້ວຍສຳມາ ຍານະ ອັນເປັນອະເສຂະ
໑໐. ເປັນຜູ້ປະກອບດ້ວຍສຳມາ ວິມຸດຕິ ອັນເປັນອະເສຂະ

ພັນທາລິ ພິກຂຸຜູ້ປະກອບດ້ວຍທຳ ໑໐ ປະການນີ້ແລ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກສິນາ ຄວນແກ່ການທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ”

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະພັນທາລິມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ພັນທາລິສູດທີ ໕ ຈົບ**

# ៦. ລະຕຸກິໂກປະມະສູດ

## ວ່າດ້ວຍອຸປະມາດ້ວຍນາງນົກຂີ້ໄຖ

[໑໔໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ນິຄົມຂອງຊາວອັງຄຸດກາປະຊື່ອາປະໜະ ແຄວ້ນອັງຄຸດກາປະ ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດ ແລະຈີວອນ ສະເດັດເຂົ້າໄປບິນທະບາດຍັງອາປະໜະນິຄົມ ຊົງທ່ຽວບິນທະບາດໃນອາປະໜະນິຄົມແລ້ວ ສະເດັດກັບຈາກບິນທະບາດພາຍຫລັງສະເຫວີຍພຣະກະຍາຫານສຳເລັດແລ້ວ ຊົງເຂົ້າໄປສູ່ແຄມປ່າ ແຫ່ງໜຶ່ງເພື່ອປະທັບພັກຜ່ອນກາງເວັນ ໄດ້ປະທັບນັ່ງພັກກາງເວັນທີ່ເຫງົ້າໄມ້ແຫ່ງໜຶ່ງ ໃນເວລາເຊົ້າ ແມ່ນທ່ານພຣະອຸທາຍີກໍຄອງອັນຕະຣະວາສົກຖືບາດແລະຈີວອນເຂົ້າໄປບິນທະບາດຍັງອາປະໜະນິຄົມ ທ່ຽວບິນທະບາດໃນອາປະໜະນິຄົມແລ້ວ ກັບຈາກບິນທະບາດພາຍຫລັງສັນ ພັດຕາຫານສຳເລັດແລ້ວ ເຂົ້າໄປສູ່ແຄມປ່າເພື່ອພັກຜ່ອນກາງເວັນ ໄດ້ນັ່ງພັກກາງເວັນທີ່ເຫງົ້າໄມ້ແຫ່ງໜຶ່ງ ຄັ້ງນັ້ນ ທ່ານພຣະອຸທາຍີຫຼີບຫຼີກຢູ່ໃນທີ່ສະຫງັດ ໄດ້ເກີດຄວາມຄິດຄຳນຶງແນວນີ້ວ່າ

"ພຣະຜູ້ມີພຣະພາກເຈົ້າ ຊົງກຳຈັດທຳອັນເປັນເຫດແຫ່ງທຸກເປັນຈຳນວນຫລາຍຂອງເຮົາທັງຫລາຍ ອອກໄປໄດ້ ພຣະຜູ້ມີພຣະພາກເຈົ້າຊົງນຳທຳອັນເປັນເຫດແຫ່ງສຸກເປັນຈຳນວນຫລາຍມາໃຫ້ເຮົາທັງຫລາຍ ພຣະຜູ້ມີພຣະພາກເຈົ້າຊົງກຳຈັດອະກຸສົນທຳເປັນຈຳນວນຫລາຍຂອງເຮົາທັງຫລາຍອອກໄປໄດ້ ພຣະຜູ້ມີພຣະພາກເຈົ້າຊົງນຳກຸສົນທຳເປັນຈຳນວນຫລາຍມາໃຫ້ເຮົາທັງຫລາຍ"

ເມື່ອເວລາແລງ ທ່ານພຣະອຸທາຍີອອກຈາກທີ່ຫຼີບຫຼີກ໑ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ

## ມູນເຫດທີ່ຊົງຫ້າມສັນໃນເວລາວິການ

[໑໔໘] ທ່ານພຣະອຸທາຍີນັ່ງຢູ່ບ່ອນທີ່ສົມຄວນແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ຂ້າພຣະອົງຫຼີບຫຼີກຢູ່ໃນທີ່ສະຫງັດໄດ້ເກີດຄວາມຄິດຄຳນຶງແນວນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງກຳຈັດທຳອັນເປັນເຫດແຫ່ງທຸກເປັນຈຳນວນຫລາຍຂອງເຮົາທັງຫລາຍອອກໄປໄດ້ ພຣະຜູ້ມີພຣະພາກເຈົ້າຊົງນຳທຳອັນເປັນເຫດ

ແຫ່ງສຸກ ເປັນຈຳນວນຫລາຍມາໃຫ້ເຮົາທັງຫລາຍ ພຣະຜູ້ມີພຣະພາກເຈົ້າຊົງກຳຈັດອະກຸສົນທຳ ເປັນຈຳນວນຫລາຍຂອງເຮົາທັງຫລາຍອອກໄປໄດ້ ພຣະຜູ້ມີພຣະພາກເຈົ້າຊົງນຳກຸສົນທຳເປັນ ຈຳນວນຫລາຍມາໃຫ້ເຮົາທັງຫລາຍ" ກໍແຕ່ກ່ອນຂ້າພຣະອົງເຄີຍສັນໄດ້ທັງເວລາແລງ ເວລາເຊົ້າ ແລະເວລາວິການກາງເວັນ(ຫລັງທ່ຽງ)

ໃນສະໄໝທີ່ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫລາຍມາຕັດວ່າ "ພິກຂຸ ທັງຫລາຍ ເຮົາຂໍເຕືອນ ທ່ານທັງຫລາຍຈົ່ງເຊົາສັນໂພຊະນະໃນເວລາວິການກາງເວັນສາເທີ້ນ"

ຂ້າພຣະອົງນັ້ນມີຄວາມນ້ອຍໃຈ ມີຄວາມເສຍໃຈວ່າ "ຄະຫະບໍດີທັງຫລາຍຜູ້ມີສັດທາຈະ ຖວາຍຂອງຄວນຫຍ້ຳ ຂອງຄວນສັນອັນປະນີດແມ່ນໃດແກ່ເຮົາທັງຫລາຍໃນເວລາວິການກາງ ເວັນ ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດຮັບສັ່ງໃຫ້ເຮົາທັງຫລາຍເຊົາສັນໂພຊະນະໃນເວລາວິການ ກາງເວັນແມ່ນນັ້ນ ສາແລ້ວ"

ຂ້າພຣະອົງທັງຫລາຍນັ້ນເມື່ອພິຈາລະນາເຫັນຄວາມຮັກ ຄວາມເຄົາລົບ ຄວາມລະອາຍ ແລະຄວາມເກງກົວໃນພຣະຜູ້ມີພຣະພາກເຈົ້າ ຈຶ່ງຍອມເຊົາສັນໂພຊະນະໃນເວລາວິການກາງ ເວັນນັ້ນເສຍ ດ້ວຍອາການແນວນີ້ ຂ້າພຣະອົງທັງຫລາຍນັ້ນຈຶ່ງສັນໃນເວລາຄ່ຳແລະເວລາເຊົ້າ

ໃນສະໄໝທີ່ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫລາຍມາຕັດວ່າ "ພິກຂຸ ທັງຫລາຍ ເຮົາຂໍເຕືອນ ທ່ານທັງຫລາຍຈົ່ງເຊົາສັນໂພຊະນະໃນເວລາວິການກາງຄືນສາເທີ້ນ"

ຂ້າພຣະອົງນັ້ນມີຄວາມນ້ອຍໃຈ ມີຄວາມເສຍໃຈວ່າ "ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດຮັບ ສັ່ງໃຫ້ເຮົາເຊົາສັນໂພຊະນະທີ່ນັບວ່າປະນີດກວ່າບັນດາໂພຊະນະທັງສອງນີ້ເສຍ"

ຂ້າແດ່ ພຣະອົງຜູ້ຈະເລີນ ເລື້ອງເຄີຍມີມາແລ້ວ ບຸຣຸດຄົນໜຶ່ງໄດ້ຂອງທີ່ຄວນຈະແກງມາ ໃນເວລາກາງເວັນ ຈຶ່ງບອກພັນລະຍາແນວນີ້ວ່າ "ຖ້າຈັ່ງຊັ້ນ ທ່ານຈົ່ງເກັບສິ່ງນີ້ໄວ້ ເຮົາທັງໝົດ ຈັກບໍຣິໂພກພ້ອມກັນໃນເວລາຄ່ຳ ອັນໃດ ໆ ທັງໝົດທີ່ຈະປຸງກິນຍ່ອມມີຣົສແຊບໃນເວລາ ກາງຄືນ ເວລາກາງເວັນມີຣົດບໍ່ແຊບ"

ຂ້າພຣະອົງທັງຫລາຍນັ້ນ ເມື່ອພິຈາລະນາເຫັນຄວາມຮັກ ຄວາມເຄົາລົບ ຄວາມລະອາຍ ແລະຄວາມເກງກົວໃນພຣະຜູ້ມີພຣະພາກເຈົ້າ ຈຶ່ງຍອມເຊົາສັນໂພຊະນະໃນເວລາວິການກາງຄືນ ນັ້ນເສຍ

ເລື້ອງເຄີຍມີມາແລ້ວ ພິກຂຸທັງຫລາຍທ່ຽວບິນທະບາດໄປໃນເວລາມືດຄ່ຳ ຍ່ອມເຂົ້າໄປ ໃກ້ບໍນ້ຳຄຣຳແດ່ ຕົກລົງໃນຫລຸມໂສໂຄກແດ່ ບຸກເຂົ້າໄປສູ່ປ່າໜາມແດ່ ຢຽບແມ່ງົວທີ່ກຳລັງຫລັບ ແດ່ ພົບກັບໂຈນຜູ້ທຳໂຈຣະກັມແດ່ ຜູ້ຍັງບໍ່ໄດ້ທຳໂຈຣະກັມແດ່ ຖືກມາຕຸຄາມ ຊັກຊວນໃຫ້ເສບ ສົມແດ່

ເລື້ອງເຄີຍມີມາແລ້ວ ຂ້າພຣະອົງທ່ຽວບິນທະບາດໄປໃນເວລາມືດຄ່ຳ ຍິງຄົນໜຶ່ງກຳລັງລ້າງພາຊະນະຢູ່ ໄດ້ເຫັນຂ້າພຣະອົງໂດຍແສງຟ້າແລບແລ້ວຕົກໃຈຢ້ານຮ້ອງສຽງຫລົງວ່າ "ວ້າຍ ! ຜີຫລອກ"

ເມື່ອຍິງນັ້ນກ່າວແນວນີ້ແລ້ວ ຂ້າພຣະອົງຈຶ່ງເວົ້າກັບທ່ານວ່າ "ບໍ່ແມ່ນຜີດອກ ນາງ ເຮົາເປັນພິກຂຸຢືນບິນທະບາດຢູ່"

ຍິງນັ້ນກ່າວວ່າ "ພໍ່ແມ່ຂອງພິກຂຸຕາຍແລ້ວຈັ່ງຊັ້ນບໍ ພິກຂຸ ທ່ານເອົາມີດຄົມ ໆ ສຳລັບປາດງົວມາປາດທ້ອງຂອງເຮົາເສຍຍັງດີກວ່າ ການທີ່ທ່ານມາທ່ຽວບິນທະບາດໃນເວລາມືດຄ່ຳແນວນີ້ຍ້ອນເຫັນແກ່ປາກແກ່ທ້ອງ ບໍ່ດີເລີຍ"

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອຂ້າພຣະອົງຣະນຶກເຖິງເລື້ອງນັ້ນຢູ່ ຈຶ່ງຄິດແນວນີ້ວ່າ "ພຣະຜູ້ມີພຣະພາກເຈົ້າ ຊົງກຳຈັດທຳອັນເປັນເຫດແຫ່ງທຸກເປັນຈຳນວນຫລາຍຂອງເຮົາທັງຫລາຍ ອອກໄປໄດ້ ພຣະຜູ້ມີພຣະພາກເຈົ້າຊົງນຳທຳອັນເປັນເຫດແຫ່ງສຸກເປັນຈຳນວນຫລາຍມາໃຫ້ເຮົາທັງຫລາຍ ພຣະຜູ້ມີພຣະພາກເຈົ້າຊົງກຳຈັດອະກຸສົນທຳເປັນຈຳນວນຫລາຍຂອງເຮົາທັງຫລາຍອອກໄປໄດ້ ພຣະຜູ້ມີພຣະພາກເຈົ້າຊົງນຳກຸສົນທຳເປັນຈຳນວນຫລາຍມາໃຫ້ເຮົາທັງຫລາຍ"

## ອຸປະມາດ້ວຍນາງນົກຂີ້ໄຖ

[໑໕໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸທາຍີ ແນວນັ້ນຄືກັນ ໂມຄະບຸຣຸດ ລາງພວກໃນທຳວິໄນນີ້ ເມື່ອເຮົາກ່າວວ່າ "ຈົ່ງລະຄວາມຜິດນີ້ສາເທີ້ນ" ກໍກ່າວແນວນີ້ວ່າ "ຄວາມຜິດພຽງເລັກນ້ອຍນີ້ຈະສຳຄັນອັນໃດ ພຣະສະມະນະຮູບນີ້ຊ່າງເຄັ່ງຄັດຫຼາຍ" ພວກເຂົາຈຶ່ງບໍ່ລະຄວາມຜິດນັ້ນທັງທີ່ຍັງມີຄວາມຢຳເກງໃນເຮົາຢູ່ ອັນໜຶ່ງ ຄວາມຜິດພຽງເລັກນ້ອຍຂອງພິກຂຸທັງຫລາຍຜູ້ຕ້ອງການໃນສິກຂາ ຍ່ອມເປັນເຄື່ອງມັດທີ່ມີກຳລັງ ໝັ້ນຄົງ ແໜ້ນແຟ້ນ ບໍ່ເປື່ອຍ ເປັນຄືໄມ້ຄ້ອນໃຫຍ່ ປຽບຄືນາງນົກຂີ້ໄຖຖືກມັດດ້ວຍເຄືອຫົວກຸດ ຍ່ອມຖ້າເວລາທີ່ຈະຖືກຂ້າ ເວລາທີ່ຈະຖືກມັດ ຫຼືຄວາມຕາຍໃນບ່ອນນັ້ນເອງ ຜູ້ໃດຈະເພິ່ງກ່າວແນວນີ້ວ່າ "ເຄື່ອງດັກຄືເຄືອຫົວກຸດທີ່ເຂົາໃຊ້ມັດນາງນົກຂີ້ໄຖເຊິ່ງຖ້າເວລາທີ່ຈະຖືກຂ້າ ເວລາທີ່ຈະຖືກມັດ ຫຼືຄວາມຕາຍໃນບ່ອນນັ້ນ ເປັນເຄື່ອງມັດບໍ່ມີກຳລັງ ບອບບາງ ເປື່ອຍ ບໍ່ມີແກ່ນ" ຜູ້ນັ້ນ ເມື່ອກ່າວແນວນີ້ຊື່ວ່າກ່າວຖືກຕ້ອງບໍ?"

ທ່ານພຣະອຸທາຍີຂາບທູນວ່າ "ບໍ່ ຂ້ານ້ອຍ ເຄື່ອງດັກຄືເຄືອຫົວກຸດທີ່ເຂົາໃຊ້ມັດນາງນົກຂີ້ໄຖ ເຊິ່ງຖ້າເວລາທີ່ຈະຖືກຂ້າ ເວລາທີ່ຈະຖືກມັດ ຫຼື ຄວາມຕາຍໃນບ່ອນນັ້ນແລ ເປັນເຄື່ອງມັດທີ່ມີກຳລັງ ໝັ້ນຄົງ ແໜ້ນແຟ້ນ ບໍ່ເປື່ອຍ ເປັນຄືໄມ້ຄ້ອນໃຫຍ່ ຂ້ານ້ອຍ"

"ອຸທາຍີ ໂມຄະບຸຣຸດລາງພວກໃນທຳວິໄນນີ້ກໍແນວນັ້ນຄືກັນ ເມື່ອເຮົາກ່າວວ່າ "ຈົ່ງລະຄວາມຜິດນີ້ສາເຫີ້ນ" ກໍກ່າວແນວນີ້ວ່າ "ຄວາມຜິດພຽງເລັກນ້ອຍນີ້ຈະສຳຄັນອັນໃດ ພຣະສະມະນະຮູບນີ້ຊ່າງເຄັ່ງຄັດຫຼາຍ" ພວກເຂົາຈຶ່ງບໍ່ລະຄວາມຜິດນັ້ນທັງທີ່ຍັງມີຄວາມຢຳເກງໃນເຮົາຢູ່ ອັນໜຶ່ງ ຄວາມຜິດພຽງເລັກນ້ອຍຂອງພິກຂຸທັງຫລາຍຜູ້ຕ້ອງການໃນສິກຂາ ຍ່ອມເປັນເຄື່ອງມັດທີ່ມີກຳລັງ ໝັ້ນຄົງ ແໜ້ນໜາ ບໍ່ເປື່ອຍ ເປັນຄືໄມ້ຄ້ອນໃຫຍ່

## ອຸປະມາດ້ວຍຊ້າງຕົ້ນ

[໑໕໑] ອຸທາຍີ ສ່ວນກຸນລະບຸດລາງພວກໃນທຳວິໄນນີ້ ເມື່ອເຮົາກ່າວວ່າ "ຈົ່ງລະຄວາມຜິດນີ້ສາເຫີ້ນ" ກໍກ່າວແນວນີ້ວ່າ "ຄວາມຜິດພຽງເລັກນ້ອຍທີ່ຕ້ອງລະນີ້ຈະສຳຄັນ ອັນໃດ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດສອນໃຫ້ເຮົາທັງຫລາຍລະ ພຣະສຸຄົດຈຶ່ງຕັດສອນໃຫ້ເຮົາທັງຫລາຍກຳຈັດຖິ້ມ" ພວກເຂົາລະຄວາມຜິດນັ້ນທັງທີ່ບໍ່ມີຄວາມຢຳເກງໃນເຮົາ ອັນໜຶ່ງ ພິກຂຸ ທັງຫລາຍຜູ້ຕ້ອງການໃນສິກຂາ ລະຄວາມຜິດນັ້ນແລ້ວ ບໍ່ມີຄວາມດີ້ນຣົນ ບໍ່ຢ້ານກົວ ດຳລົງຊີວິດດ້ວຍຂອງທີ່ຜູ້ອື່ນໃຫ້ ມີໃຈຄືກວາງຢູ່ ຄວາມຜິດພຽງເລັກນ້ອຍຂອງພິກຂຸເຫຼົ່ານັ້ນ ຍ່ອມເປັນເຄື່ອງມັດທີ່ບໍ່ມີກຳລັງ ບອບບາງ ເປື່ອຍ ບໍ່ມີແກ່ນສານ ປຽບຄືຊ້າງຕົ້ນ ມີງາງອນງາມ ເປັນຊ້າງຊົງ ທີ່ມີຊາດກຳເນີດດີ ເຄີຍຜ່ານເສິກສົງຄາມມາແລ້ວ ຄວານຊ້າງ ລ່າມໂຊ່ໄວ້ແນວໝັ້ນຄົງ ພໍມັນສະບັດກາຍທໍ່ນັ້ນ ກໍຈະເຮັດໃຫ້ໂຊ່ທີ່ລ່າມໄວ້ນັ້ນຂາດແລ້ວໜີໄປ ຕາມໃຈປາຖະໜາ ຜູ້ໃດຈະເພິ່ງກ່າວແນວນີ້ວ່າ "ຊ້າງຕົ້ນນັ້ນມີງາງອນງາມ ເປັນຊ້າງຊົງ ທີ່ມີຊາດກຳເນີດດີ ເຄີຍຜ່ານເສິກສົງຄາມມາແລ້ວ ຄວານຊ້າງລ່າມໂຊ່ໄວ້ແນວໝັ້ນຄົງ ພໍມັນສະບັດກາຍທໍ່ນັ້ນ ກໍຈະເຮັດໃຫ້ໂຊ່ທີ່ລ່າມໄວ້ນັ້ນຂາດໜີໄປຕາມໃຈປາຖະໜາ ໂຊ່ນັ້ນຈັດເປັນເຄື່ອງມັດທີ່ມີກຳລັງ ໝັ້ນຄົງ ແໜ້ນໜາ ບໍ່ເປື່ອຍ ເປັນຄືໄມ້ຄ້ອນໃຫຍ່" ຜູ້ນັ້ນເມື່ອກ່າວແນວນີ້ຊື່ວ່າກ່າວຖືກຕ້ອງບໍ?"

"ບໍ່ ຂ້ານ້ອຍ ຍ້ອນຊ້າງຕົ້ນນັ້ນມີງາງອນງາມ ເປັນຊ້າງຊົງທີ່ມີຊາດ ກຳເນີດດີ ເຄີຍຜ່ານເສິກສົງຄາມມາແລ້ວ ຄວານຊ້າງລ່າມໂຊ່ໄວ້ແນວໝັ້ນຄົງ ພໍມັນສະບັດກາຍທໍ່ນັ້ນ ກໍຈະເຮັດໃຫ້ໂຊ່ທີ່ລ່າມໄວ້ນັ້ນຂາດແລ້ວໜີໄປຕາມໃຈປາຖະໜາ ເຄື່ອງມັດຊ້າງຕົ້ນນັ້ນຈັດເປັນເຄື່ອງມັດທີ່ບໍ່ມີກຳລັງ ຯລຯ ບໍ່ມີແກ່ນສານ ຂ້ານ້ອຍ"

"ອຸທາຍີ ກຸນລະບຸດລາງພວກໃນທຳວິໄນນີ້ກໍແນວນັ້ນຄືກັນ ເມື່ອເຮົາກ່າວວ່າ "ຈົ່ງລະຄວາມຜິດນີ້ສາເຫີ້ນ" ກໍກ່າວແນວນີ້ວ່າ "ຄວາມຜິດພຽງເລັກນ້ອຍທີ່ຕ້ອງລະນີ້ຈະສຳຄັນອັນໃດ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດສອນໃຫ້ເຮົາທັງຫລາຍລະ ພຣະສຸຄົດຈຶ່ງຕັດສອນໃຫ້ເຮົາທັງຫລາຍກຳຈັດຖິ້ມ" ພວກເຂົາລະຄວາມຜິດນັ້ນທັງທີ່ບໍ່ມີຄວາມຢຳເກງໃນເຮົາ ອັນໜຶ່ງ ພິກຂຸທັງຫລາຍຜູ້ຕ້ອງການໃນສິກຂາ ລະຄວາມຜິດນັ້ນແລ້ວ ເປັນຜູ້ບໍ່ມີຄວາມດີ້ນຣົນ ບໍ່ຢ້ານກົວ ດຳລົງຊີວິດດ້ວຍຂອງທີ່ຜູ້ອື່ນໃຫ້ ມີໃຈຄືກວາງຢູ່ ຄວາມຜິດພຽງເລັກນ້ອຍຂອງພິກຂຸເຫຼົ່ານັ້ນ ຈັດເປັນເຄື່ອງມັດທີ່ບໍ່ມີກຳລັງ ບອບບາງ ເປື່ອຍ ບໍ່ມີແກ່ນສານ

## ອຸປະມາດ້ວຍຄົນຈົນ

[໑໕໔] ອຸທາຍີ ປຽບຄືຄົນທຸກໄຮ້ ບໍ່ມີຊັບສິນແນວໃດເປັນຂອງຕົນ ຈັດເປັນຄົນຈົນ ບໍ່ແມ່ນຄົນຮັ່ງມີເລີຍ ເຂົາມີເຮືອນນ້ອຍ ໆ ຫລັງໜຶ່ງ ເຊິ່ງມີເຄື່ອງມຸງ ແລະ ເຄື່ອງປະກອບອື່ນ ໆ ຜຸພັງ ໂລະເລະ ຕ້ອງຖ້າໄລ່ນົກກາ ບໍ່ເປັນຮູບເຮືອນ ມີເປຫາມຄົນເຈັບອັນໜຶ່ງກໍຜຸພັງເກືອບບໍ່ເປັນເປຫາມຄົນເຈັບ ມີເຂົ້າເປືອກແລະເມັດພືດສໍາລັບຫວ່ານພໍ້ໜຶ່ງ ເຊິ່ງບໍ່ແມ່ນພັນດີ ມີພັນລະຍາຄົນໜຶ່ງກໍບໍ່ງາມ ເຂົາເຫັນພິກຂຸຜູ້ຢູ່ໃນອາຮາມມີມືແລະຕີນລ້າງສະອາດສະອ້ານ ສັນໂພຊະນະລ້ວນເປັນຕາແຊບ ນັ່ງຢູ່ໃນສະຖານທີ່ຮົ່ມເຢັນສະບາຍ ຈະເລີນທໍາເພີກ ສະມາທິ ເຂົາຈະເພິ່ງມີຄວາມຄິດແນວນີ້ວ່າ "ຄວາມເປັນສະມະນະໜ້າສຸກສະບາຍນໍ ຄວາມເປັນສະມະນະບໍ່ມີໂລກໄພໄຂ້ເຈັບນໍ ເຮົາຄວນຈະແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດຄືກັນ"

ແຕ່ເຂົາບໍ່ອາດສະລະເຮືອນຫລັງນ້ອຍນັ້ນ ເຊິ່ງມີເຄື່ອງມຸງບັງແລະເຄື່ອງປະກອບອື່ນ ໆ ຜຸພັງ ໂລະເລະ ຕ້ອງຄອຍໄລ່ນົກກາ ບໍ່ເປັນຮູບເຮືອນ ບໍ່ອາດລະເປຫາມຄົນເຈັບອັນໜຶ່ງທີ່ຜຸພັງເກືອບບໍ່ເປັນເປຫາມຄົນເຈັບ ບໍ່ອາດລະເຂົ້າເປືອກແລະເມັດພືດສໍາລັບຫວ່ານພໍ້ໜຶ່ງ ເຊິ່ງບໍ່ແມ່ນພັນດີ ບໍ່ອາດລະພັນລະຍາຄົນໜຶ່ງເຊິ່ງມີຮູບບໍ່ສວຍ ແລ້ວແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດໄດ້

ອຸທາຍີ ຜູ້ໃດກ່າວແນວນີ້ວ່າ "ເຄື່ອງມັດທີ່ມັດບຸຣຸດນັ້ນ ຜູ້ບໍ່ອາດລະເຮືອນຫລັງນ້ອຍ ໆ ຫລັງໜຶ່ງເຊິ່ງມີເຄື່ອງມຸງບັງແລະເຄື່ອງປະກອບອື່ນ ໆ ຜຸພັງ ໂລະເລະ ຕ້ອງຄອຍໄລ່ນົກກາ ບໍ່ເປັນຮູບເຮືອນ ບໍ່ອາດລະເປຫາມຄົນເຈັບອັນໜຶ່ງທີ່ຜຸພັງເກືອບບໍ່ເປັນເປຫາມຄົນເຈັບ ບໍ່ອາດລະເຂົ້າເປືອກ ແລະ ເມັດພືດສໍາລັບຫວ່ານພໍ້ໜຶ່ງ ເຊິ່ງບໍ່ແມ່ນພັນດີ ບໍ່ອາດລະພັນລະຍາຄົນໜຶ່ງເຊິ່ງມີຮູບ ບໍ່ສວຍ ແລ້ວແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ ຈັດເປັນເຄື່ອງມັດທີ່ບໍ່ມີກໍາລັງ ບອບບາງ ເປື່ອຍ ບໍ່ມີແກ່ນສານ" ຜູ້ນັ້ນເມື່ອ ກ່າວແນວນີ້ ຊື່ວ່າກ່າວຖືກຕ້ອງບໍ?"

"ບໍ່ ຂ້ານ້ອຍ ຍ້ອນເຄື່ອງມັດທີ່ມັດບຸຣຸດນັ້ນ ຜູ້ບໍ່ອາດລະໄດ້ແມ່ນແຕ່ເຮືອນຫລັງນ້ອຍ ໆ ຫລັງນັ້ນ ເຊິ່ງມີເຄື່ອງມຸງແລະເຄື່ອງປະກອບອື່ນ ໆ ຜຸພັງ ໂລະເລະ ທີ່ຕ້ອງຄອຍໄລ່ນົກກາ ບໍ່ເປັນຮູບເຮືອນ ບໍ່ອາດລະເປຫາມຄົນເຈັບອັນໜຶ່ງທີ່ຜຸພັງເກືອບບໍ່ເປັນເປຫາມຄົນເຈັບ ບໍ່ອາດລະເຂົ້າເປືອກແລະເມັດພືດສໍາລັບຫວ່ານພໍ້ໜຶ່ງ ເຊິ່ງບໍ່ແມ່ນພັນດີ ບໍ່ອາດລະພັນລະຍາ ຄົນໜຶ່ງເຊິ່ງມີຮູບບໍ່ສວຍ ແລ້ວແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດໄດ້ ຈັດເປັນເຄື່ອງມັດທີ່ມີກໍາລັງ ໝັ້ນຄົງ ແໜ້ນແຟ້ນ ບໍ່ເປື່ອຍ ເປັນຄືໄມ້ຄ້ອນໃຫຍ່"

"ອຸທາຍີ ໂມຄະບຸຣຸດລາງພວກໃນທຳວິໄນນີ້ກໍແນວນັ້ນຄືກັນ ເມື່ອເຮົາກ່າວວ່າ "ຈົ່ງລະຄວາມຜິດນີ້ສາເຫີ້ນ" ກໍກ່າວແນວນີ້ວ່າ "ຄວາມຜິດພຽງເລັກນ້ອຍນີ້ຈະສຳຄັນອັນໃດ ພຣະສະມະນະຮູບນີ້ຊ່າງເຄັ່ງຄັດຫຼາຍ" ພວກເຂົາຈຶ່ງບໍ່ລະຄວາມຜິດນັ້ນທັງທີ່ຍັງມີຄວາມຢຳເກງໃນເຮົາ ອັນໜຶ່ງ ຄວາມຜິດພຽງເລັກນ້ອຍຂອງພິກຂຸທັງຫລາຍ ຜູ້ຕ້ອງການໃນສິກຂານັ້ນ ຍ່ອມເປັນເຄື່ອງມັດທີ່ມີກຳລັງ ໝັ້ນຄົງ ແໜ້ນແຟ້ນ ບໍ່ເປື່ອຍ ເປັນຄືໄມ້ຄ້ອນໃຫຍ່

## ອຸປະມາດ້ວຍຄົນມັ່ງມີ

[໑໕໓] ອຸທາຍີ ປຽບຄື ຄະຫະບໍດີຫຼືບຸດຄະຫະບໍດີຜູ້ຮັ່ງມີ ມີຊັບຫຼາຍ ມີສົມບັດຫຼາຍ ສະສົມຄຳໄວ້ຫຼາຍຮ້ອຍແທ່ງ ສະສົມເຂົ້າເປືອກ ນາ ທີ່ດິນ ພັນລະຍາ ຂ້າທາດຊາຍ ຂ້າທາດຍິງໄວ້ເປັນຈຳນວນຫລາຍ ເຂົາເຫັນພິກຂຸຜູ້ຢູ່ໃນອາຮາມມີມື້ ແລະ ຕີນລ້າງສະອາດສະອ້ານ ສັນໂພຊະນະລ້ວນເປັນຕາແຊບ ນັ່ງຢູ່ໃນສະຖານທີ່ຮົ່ມເຢັນສະບາຍ ຈະເລີນທຳເຝິກສະມາທິ ເຂົາຈະເພິ່ງມີຄວາມຄິດແນວນີ້ວ່າ "ຄວາມເປັນສະມະນະໜ້າສຸກສະບາຍນໍ ຄວາມເປັນ ສະມະນະບໍ່ມີໂລກໄພໄຂ້ເຈັບນໍ ເຮົາຄວນຈະແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດຄືກັນ"

ເຂົາອາດຈະລະຄຳຫຼາຍຮ້ອຍແທ່ງ ລະເຂົ້າເປືອກ ນາ ທີ່ດິນ ພັນລະຍາ ຂ້າທາດຊາຍຂ້າທາດຍິງ ເປັນຈຳນວນຫລາຍແລ້ວແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ ຜູ້ໃດຈະເພິ່ງກ່າວແນວນີ້ວ່າ "ເຄື່ອງມັດທີ່ມັດຄະຫະບໍດີຫຼືບຸດຄະຫະບໍດີ ຜູ້ອາດລະຄຳຫຼາຍຮ້ອຍແທ່ງ ລະເຂົ້າເປືອກ ນາ ທີ່ດິນ ພັນລະຍາ ຂ້າທາດຊາຍ ຂ້າທາດຍິງເປັນຈຳນວນຫລາຍ ແລ້ວແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ ຈັດເປັນເຄື່ອງມັດທີ່ມີກຳລັງ ໝັ້ນຄົງ ແໜ້ນແຟ້ນ ບໍ່ເປື່ອຍ ເປັນຄືທ່ອນ ບໍ່ໃຫຍ່" ຜູ້ນັ້ນເມື່ອກ່າວແນວນີ້ ຊື່ວ່າກ່າວຖືກຕ້ອງບໍ?"

"ບໍ່ ຂ້ານ້ອຍ ຍ້ອນເຄື່ອງມັດທີ່ມັດຄະຫະບໍດີຫຼືບຸດຄະຫະບໍດີ ຜູ້ອາດລະຄຳຫຼາຍຮ້ອຍແທ່ງ ລະເຂົ້າເປືອກ ນາ ທີ່ດິນ ພັນລະຍາ ຂ້າທາດຊາຍ ຂ້າທາດຍິງ ເປັນຈຳນວນຫລາຍແລ້ວແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ ຈັດເປັນເຄື່ອງມັດທີ່ບໍ່ມີກຳລັງ ບອບບາງ ເປື່ອຍ ບໍ່ມີແກ່ນສານ ຂ້ານ້ອຍ"

"ອຸທາຍີ ກຸນລະບຸດລາງພວກໃນທຳວິໄນນີ້ກໍແນວນັ້ນຄືກັນ ເມື່ອເຮົາກ່າວວ່າ "ຈົ່ງລະຄວາມຜິດນີ້ສາເຫີ້ນ" ກໍກ່າວແນວນີ້ວ່າ "ຄວາມຜິດພຽງເລັກນ້ອຍທີ່ຕ້ອງລະນີ້ ຈະສຳຄັນອັນໃດພຣະຜູ້ມີພຣະພາກເຈົ້າຈຶ່ງຕັດສອນໃຫ້ເຮົາທັງຫລາຍລະ ພຣະສຸຄົດຈຶ່ງຕັດສອນໃຫ້ເຮົາທັງຫລາຍກຳຈັດຖິ້ມ" ພວກເຂົາຈຶ່ງລະຄວາມຜິດນັ້ນທັງທີ່ບໍ່ມີຄວາມຢຳເກງໃນເຮົາ ອັນໜຶ່ງ ພິກຂຸທັງ

ຫລາຍຜູ້ຕ້ອງການໃນສິກຂາ ລະຄວາມຜິດນັ້ນແລ້ວ ເປັນຜູ້ບໍ່ມີຄວາມດີ້ນຣົນ ບໍ່ຢ້ານກົວ ດຳລົງຊີວິດດ້ວຍຂອງທີ່ຜູ້ອື່ນໃຫ້ ມີໃຈຄືກວາງຢູ່ ຄວາມຜິດພຽງເລັກນ້ອຍຂອງພິກຂຸເຫຼົ່ານັ້ນ ຈັດເປັນເຄື່ອງມັດທີ່ບໍ່ມີກຳລັງ ບອບບາງ ເປື່ອຍ ບໍ່ມີແກ່ນສານ

## ບຸກຄົນ ໔ ຈຳພວກ

[໑໕໔] ອຸທາຍີ ບຸກຄົນ ໔ ຈຳພວກນີ້ມີປາກົດຢູ່ໃນໂລກ

ບຸກຄົນ ໔ ຈຳພວກ ໃດແດ່
ຄື ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ປະຕິບັດເພື່ອລະອຸປະທິ໑ເພື່ອກຳຈັດຖິ້ມອຸປະທິ ຄວາມດຳຣິທີ່ແລ່ນໄປອັນປະກອບດ້ວຍອຸປະທິ ຍັງຄອບງຳບຸກຄົນຜູ້ປະຕິບັດເພື່ອລະອຸປະທິ ເພື່ອກຳຈັດຖິ້ມອຸປະທິນັ້ນຢູ່ ຜູ້ນັ້ນຍັງຮັບຄວາມດຳຣິນັ້ນໄວ້ ບໍ່ລະ ບໍ່ບັນເທົາ ບໍ່ເຮັດໃຫ້ສິ້ນສຸດ ແລະ ບໍ່ເຮັດໃຫ້ໝົດໄປ ເຮົາຮຽກບຸກຄົນນີ້ວ່າ “ຜູ້ຍັງມີກິເລດ ບໍ່ແມ່ນ ຜູ້ຄາຍກິເລດ”

ຂໍ້ນັ້ນຍ້ອນເຫດໃດ?
ຍ້ອນເຮົາຮູ້ຄວາມຕ່າງແຫ່ງອິນຊີໃນບຸກຄົນນີ້

໒. ເປັນຜູ້ປະຕິບັດເພື່ອລະອຸປະທິ ເພື່ອກຳຈັດຖິ້ມອຸປະທິ ຄວາມດຳຣິທີ່ແລ່ນໄປອັນປະກອບດ້ວຍອຸປະທິ ຍັງຄອບງຳບຸກຄົນຜູ້ປະຕິບັດເພື່ອລະອຸປະທິ ເພື່ອກຳຈັດຖິ້ມອຸປະທິນັ້ນຢູ່ ຜູ້ນັ້ນບໍ່ຮັບຄວາມດຳຣິເຫຼົ່ານັ້ນໄວ້ ລະໄດ້ ບັນເທົາໄດ້ ເຮັດໃຫ້ສິ້ນສຸດໄດ້ ແລະ ເຮັດໃຫ້ໝົດໄປ ເຮົາຮຽກບຸກຄົນນີ້ວ່າ “ຜູ້ຍັງມີກິເລດ ບໍ່ແມ່ນຜູ້ຄາຍກິເລດ”

ຂໍ້ນັ້ນຍ້ອນເຫດໃດ?
ຍ້ອນເຮົາຮູ້ຄວາມຕ່າງແຫ່ງອິນຊີໃນບຸກຄົນນີ້

໓. ເປັນຜູ້ປະຕິບັດເພື່ອລະອຸປະທິ ເພື່ອກຳຈັດຖິ້ມອຸປະທິ ຄວາມດຳຣິທີ່ແລ່ນໄປອັນປະກອບດ້ວຍອຸປະທິ ຍັງຄອບງຳບຸກຄົນຜູ້ປະຕິບັດເພື່ອລະອຸປະທິ ເພື່ອກຳຈັດຖິ້ມອຸປະທິນັ້ນຢູ່ ຍ້ອນຄວາມຫລົງລືມສະຕິໃນບາງເທື່ອບາງເວລາ ສະຕິເກີດຊ້າໄປ ແທ້ຈິງເຂົາລະໄດ້ ບັນເທົາໄດ້ ເຮັດໃຫ້ສິ້ນສຸດໄດ້ ແລະ ເຮັດໃຫ້ໝົດໄປ ໄດ້ທັນທີ ຄົນຢົດນ້ຳ ໒ ຢົດ ຫຼື ໓ ຢົດລົງໃນກະທະເຫລັກ ທີ່ຮ້ອນຢູ່ເມິດມື້ ຢົດນ້ຳທີ່ຢົດລົງແນວຊ້າ ໆ ກໍຈະເຫືອດແຫ້ງໄປ ທັນທີ ແມ່ນສັນໃດ ບຸກຄົນລາງຄົນໃນໂລກນີ້ກໍສັນນັ້ນຄືກັນ ເປັນຜູ້ປະຕິບັດເພື່ອລະອຸປະທິ ເພື່ອກຳຈັດຖິ້ມອຸປະທິ ຄວາມດຳຣິທີ່ແລ່ນໄປອັນປະກອບ ດ້ວຍອຸປະທິ ຍັງຄອບງຳບຸກຄົນຜູ້ປະຕິບັດເພື່ອລະອຸປະທິ ເພື່ອກຳຈັດຖິ້ມອຸປະທິນັ້ນຢູ່ ຍ້ອນຄວາມຫລົງລືມສະຕິໃນບາງເທື່ອບາງເວລາ ສະຕິເກີດຊ້າໄປ

ແທ້ຈິງເຂົາລະໄດ້ ບັນເທົາໄດ້ ເຮັດໃຫ້ສິ້ນສຸດໄດ້ ແລະເຮັດໃຫ້ໝົດໄປໄດ້ໂດຍທັນທີ ເຮົາຮຽກບຸກຄົນນີ້ວ່າ "ຜູ້ຍັງມີກິເລດ ບໍ່ແມ່ນຜູ້ຄາຍກິເລດ"

ຂໍ້ນັ້ນຍ້ອນເຫດໃດ?
ຍ້ອນເຮົາຮູ້ຄວາມຕ່າງແຫ່ງອິນຊີໃນບຸກຄົນນີ້

໔. ຮູ້ວ່າ "ອຸປະທິ ເປັນເຫດແຫ່ງທຸກ" ແລ້ວເປັນຜູ້ບໍ່ມີອຸປະທິ ນ້ອມຈິດໄປໃນທຳເປັນທີ່ສິ້ນອຸປະທິ ເຮົາຮຽກບຸກຄົນນີ້ວ່າ "ຜູ້ຄາຍກິເລດໄດ້ແລ້ວ ບໍ່ແມ່ນຜູ້ມີກິເລດ"

ຂໍ້ນັ້ນຍ້ອນເຫດໃດ?
ຍ້ອນເຮົາຮູ້ຄວາມຕ່າງແຫ່ງອິນຊີໃນບຸກຄົນນີ້

ບຸກຄົນ ໔ ຈຳພວກນີ້ມີຜາກົດຢູ່ໃນໂລກ

## ກາມມະຄຸນ ໕ ປະການ

[໑໕໕] ອຸທາຍີ ກາມມະຄຸນມີ ໕ ປະການນີ້

ກາມມະຄຸນ ໕ ປະການ ອັນໃດແດ່ ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

໒. ສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ

໓. ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ

໔. ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ

໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ກາມມະຄຸນມີ ໕ ປະການນີ້ແລ

ອຸທາຍີ ສຸກໂສມະນັດທີ່ອາໄສກາມມະຄຸນ ໕ ປະການນີ້ເກີດຂຶ້ນ ເຮົາຮຽກວ່າ ຄວາມສຸກທີ່ເກີດຈາກກາມ ຄວາມສຸກບໍ່ສະອາດ ຄວາມສຸກຂອງປຸຖຸຊົນ ບໍ່ແມ່ນຄວາມສຸກຂອງພຣະອະຣິຍະເຮົາກ່າວວ່າ "ບໍ່ຄວນເສບ ບໍ່ຄວນໃຫ້ຈະເລີນ ບໍ່ຄວນເຮັດໃຫ້ຫຼາຍ ຄວນເກງກົວສຸກຊະນິດນີ້"

## ຣູບຊານ ໔

[໑໔໖] ອຸທາຍີ ພິກຂຸໃນທຳວິໄນນີ້ສະຫງັດຈາກກາມ ແລະ ອະກຸສົນທຳທັງຫລາຍແລ້ວ ບັນລຸປະຖົມຊານ ໆລໆ ຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານ ໆລໆ ຍ້ອນປີຕິຈາງຄາຍອອກ ມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ໆລໆ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດ ແລະ ໂທມະນັດດັບໄປກ່ອນບັນລຸຈະຕຸດຖະຊານ ໆລໆ໖ ຢູ່ ຊານທັງ ໔ ນີ້ເຮົາຮຽກວ່າ ຄວາມສຸກເກີດຈາກການອອກຈາກກາມ ຄວາມສຸກເກີດຈາກຄວາມສະຫງັດ ຄວາມສຸກເກີດຈາກຄວາມສະງົບ ຄວາມສຸກເກີດຈາກການຕັດສະຣູ້ ເຮົາກ່າວວ່າ "ຄວນເສບ ຄວນໃຫ້ຈະເລີນ ຄວນເຮັດໃຫ້ຫຼາຍ ບໍ່ຄວນເກງກົວສຸກຊະນິດນີ້"

ພິກຂຸໃນທຳວິໄນນີ້ສະຫງັດຈາກກາມ ແລະ ອະກຸສົນທຳທັງຫລາຍແລ້ວ ບັນລຸປະຖົມຊານ ໆລໆ ຢູ່ ປະຖົມຊານນີ້ເຮົາກ່າວວ່າ ຍັງຫວັ່ນໄຫວ ໃນປະຖົມຊານນັ້ນ ຍັງມີອັນໃດຫວັ່ນໄຫວແດ່? ການທີ່ວິຕົກວິຈານໃນປະຖົມຊານນີ້ຍັງບໍ່ດັບ ເປັນຄວາມຫວັ່ນໄຫວໃນປະຖົມຊານນັ້ນຍ້ອນວິຕົກວິຈານສະງົບລະງັບໄປ

ພິກຂຸໃນທຳວິໄນນີ້ ບັນລຸທຸຕິຍະຊານ ໆລໆ ຢູ່ ແມ່ນທຸຕິຍະຊານນີ້ເຮົາກໍກ່າວວ່າ ຍັງຫວັ່ນໄຫວ ໃນທຸຕິຍະຊານນັ້ນຍັງມີອັນໃດຫວັ່ນໄຫວ ການທີ່ປີຕິແລະສຸກໃນທຸຕິຍະຊານນີ້ຍັງບໍ່ດັບ ເປັນຄວາມຫວັ່ນໄຫວໃນທຸຕິຍະຊານນັ້ນ ຍ້ອນປີຕິຈາງຄາຍອອກ

ພິກຂຸໃນທຳວິໄນນີ້ມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກ ດ້ວຍນາມກາຍ ບັນລຸຕະຕິຍະຊານ ໆລໆ ຢູ່ ແມ່ນຕະຕິຍະຊານນີ້ເຮົາກໍກ່າວວ່າ ຍັງຫວັ່ນໄຫວ ໃນຕະຕິຍະຊານນັ້ນຍັງມີອັນໃດຫວັ່ນໄຫວ ການທີ່ອຸເປກຂາແລະສຸກໃນຕະຕິຍະຊານນີ້ຍັງບໍ່ດັບ ເປັນຄວາມຫວັ່ນໄຫວໃນຕະຕິຍະຊານນັ້ນ ຍ້ອນລະສຸກ ແລະທຸກໄດ້ ຍ້ອນໂສມະນັດ ແລະໂທມະນັດດັບໄປກ່ອນ ພິກຂຸໃນທຳວິໄນນີ້ ບັນລຸຈະຕຸດຖະຊານ ໆລໆ ຢູ່ ຈະຕຸດຖະຊານນີ້ເຮົາກ່າວວ່າ ບໍ່ຫວັ່ນໄຫວ

## ອະຣູບປະຊານ ໔

ອຸທາຍີ ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມ ແລະອະກຸສົນທຳທັງຫລາຍແລ້ວ ບັນລຸປະຖົມຊານ ໆລໆ ຢູ່ ປະຖົມຊານນີ້ເຮົາກ່າວວ່າ "ບໍ່ຄວນທຳຄວາມອາໄລ ທ່ານທັງຫລາຍ ຈົ່ງລະ ຈົ່ງກ້າວລ່ວງ"

ອັນໃດນໍ? ເປັນທຳເຄື່ອງກ້າວລ່ວງປະຖົມຊານນັ້ນ

ຄື ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸໃນທຳວິໄນນີ້ ບັນລຸທຸຕິຍະຊານ ຯລຯ ຢູ່ ນີ້ເປັນທຳເຄື່ອງກ້າວລ່ວງປະຖົມຊານນັ້ນ ແມ່ນທຸຕິຍະຊານນີ້ເຮົາກໍກ່າວວ່າ "ບໍ່ຄວນທຳຄວາມອາໄລ ທ່ານທັງຫລາຍຈົ່ງລະ ຈົ່ງກ້າວລ່ວງ"

ອັນໃດນໍ? ເປັນທຳເຄື່ອງກ້າວລ່ວງທຸຕິຍະຊານນັ້ນ

ຄື ຍ້ອນປີຕິຈາງຄາຍອອກ ພິກຂຸໃນທຳວິໄນນີ້ມີອຸເປກຂາ ມີສະຕິສຳປະຊັນຍະສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ຯລຯ ຢູ່ ນີ້ເປັນທຳເຄື່ອງກ້າວລ່ວງທຸຕິຍະຊານນັ້ນ ແມ່ນຕະຕິຍະຊານນີ້ເຮົາກໍກ່າວວ່າ "ບໍ່ຄວນທຳຄວາມອາໄລ ທ່ານທັງຫລາຍຈົ່ງລະ ຈົ່ງກ້າວລ່ວງ"

ອັນໃດນໍ? ເປັນທຳເຄື່ອງກ້າວລ່ວງຕະຕິຍະຊານນັ້ນ

ຄື ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນ ພິກຂຸໃນທຳວິໄນນີ້ ບັນລຸຈະຕຸດຖະຊານ ຯລຯ ຢູ່ ນີ້ເປັນທຳເຄື່ອງກ້າວລ່ວງຕະຕິຍະຊານນັ້ນ ແມ່ນຈະຕຸດຖະຊານນີ້ເຮົາກໍກ່າວວ່າ "ບໍ່ຄວນທຳຄວາມອາໄລ ທ່ານທັງຫລາຍຈົ່ງລະ ຈົ່ງກ້າວລ່ວງ"

ອັນໃດນໍ? ເປັນທຳເຄື່ອງກ້າວລ່ວງຈະຕຸດຖະຊານນັ້ນ

ຄື ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ ພິກຂຸໃນທຳວິໄນນີ້ ບັນລຸອາກາສານັນຈາຍະຕະນະຊານຢູ່ໂດຍກຳນົດວ່າ "ອາກາດຫາບ່ອນສຸດບໍ່ໄດ້" ນີ້ເປັນທຳເຄື່ອງກ້າວລ່ວງຈະຕຸດຖະຊານນັ້ນ ແມ່ນອາກາສານັນຈາຍະຕະນະຊານນີ້ເຮົາກໍກ່າວວ່າ "ບໍ່ຄວນທຳຄວາມອາໄລ ທ່ານທັງຫລາຍຈົ່ງລະ ຈົ່ງກ້າວລ່ວງ"

ອັນໃດນໍ? ເປັນທຳເຄື່ອງກ້າວລ່ວງອາກາສານັນຈາຍະຕະນະຊານນັ້ນ

ຄື ຍ້ອນລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ພິກຂຸໃນທຳວິໄນນີ້ ບັນລຸວິນຍານັນຈາຍະຕະນະຊານຢູ່ໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ນີ້ເປັນທຳເຄື່ອງກ້າວລ່ວງອາກາສານັນຈາຍະຕະນະຊານນັ້ນ ແມ່ນວິນຍານັນຈາຍະຕະນະຊານນີ້ເຮົາກໍກ່າວວ່າ "ບໍ່ຄວນທຳຄວາມອາໄລ ທ່ານທັງຫລາຍຈົ່ງລະ ຈົ່ງກ້າວລ່ວງ"

ອັນໃດນໍ? ເປັນທຳເຄື່ອງກ້າວລ່ວງວິນຍານັນຈາຍະຕະນະຊານນັ້ນ

ຄື ຍ້ອນລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ພິກຂຸໃນທຳວິໄນນີ້ບັນລຸອາກິນຈັນຍາຍະຕະນະຊານຢູ່ໂດຍກຳນົດວ່າ "ບໍ່ມີອັນໃດ" ນີ້ເປັນທຳເຄື່ອງກ້າວລ່ວງວິນຍານັນຈາຍະຕະນະຊານນັ້ນ ແມ່ນອາກິນຈັນຍາຍະຕະນະຊານນີ້ເຮົາກໍກ່າວວ່າ "ບໍ່ຄວນທຳຄວາມອາໄລ ທ່ານທັງຫລາຍຈົ່ງລະ ຈົ່ງກ້າວລ່ວງ"

ອັນໃດນໍ? ເປັນທຳເຄື່ອງກ້າວລ່ວງອາກິນຈັນຍາຍະຕະນະຊານນັ້ນ

ຄື ຍ້ອນລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ພິກຂຸໃນທຳວິໄນນີ້ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ນີ້ເປັນທຳເຄື່ອງກ້າວລ່ວງອາກິນຈັນຍາຍະຕະນະຊານນັ້ນ ແມ່ນເນວະສັນຍານາສັນຍາຍະຕະນະຊານນີ້ເຮົາກໍກ່າວວ່າ "ບໍ່ຄວນທຳຄວາມອາໄລທ່ານທັງຫລາຍຈົ່ງລະ ຈົ່ງກ້າວລ່ວງ"

ອັນໃດນໍ? ເປັນທຳເຄື່ອງກ້າວລ່ວງເນວະສັນຍານາສັນຍາຍະຕະນະຊານນັ້ນ

ຄື ຍ້ອນລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ພິກຂຸໃນທຳວິໄນນີ້ ບັນລຸສັນຍາເວທະຍິຕນິໂຣດຢູ່ ນີ້ເປັນທຳເຄື່ອງກ້າວລ່ວງເນວະສັນຍານາສັນຍາຍະຕະນະຊານນັ້ນ ເຮົາກ່າວການລະແມ່ນເນວະສັນຍານາສັນຍາຍະຕະນະຊານນີ້ດ້ວຍປະການແນວນີ້

"ອຸທາຍິ ສັງໂຍດທີ່ລະອຽດ ຫຼື ຫຍາບນັ້ນ ເຊິ່ງເຮົາຍັງບໍ່ໄດ້ກ່າວເຖິງການລະທ່ານເຫັນແດ່ບໍ?"

ທ່ານພຣະອຸບາລີຂາບທູນວ່າ "ບໍ່ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະອຸທາຍີມີໃຈຍິນດີຊົມຊື່ນ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ລະຕຸກິໂກປະມະສູດທີ່ ໖ ຈົບ**

## ໗. ຈາຕຸມະສູດ

### ວ່າດ້ວຍເຫດການໃນໝູ່ບ້ານຈາຕຸມາ

### ເລື້ອງພຣະອາຄັນຕຸກະເວົ້າສຽງດັງ

[໑໕໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ອາມົນກີວັນ ໝູ່ບ້ານຈາຕຸມາ ສະໄໝນັ້ນແລ ພິກຂຸປະມານ ໕໐໐ ອົງ ມີທ່ານພຣະສາຣີບຸດ ແລະ ທ່ານພຣະມະຫາໂມກຄັນລານະເປັນ

ຫົວໜ້າ ເດີນທາງມາເຖິງເຮືອນຈາຕຸມາເພື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ພິກຂຸອາຄັນຕຸກະເຫຼົ່ານັ້ນສົນທະນາປາໄສກັບພິກຂຸເຈົ້າຖິ່ນ ຈັດເສນາສະນະ ເກັບບາດແລະຈີວອນຢູ່ ສົ່ງສຽງດັງອື້ອຶງ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກທ່ານພຣະອານົນມາຕັດຖາມວ່າ "ອານົນ ຜູ້ທີ່ສົ່ງສຽງດັງອື້ອຶງຄືຊາວປະມົງແຍ່ງປາກັນ ເປັນພິກຂຸພວກໃດ?"

ທ່ານພຣະອານົນທູນຕອບວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸປະມານ ໕໐໐ ອົງ ມີທ່ານພຣະສາຣີບຸດ ແລະ ທ່ານພຣະມະຫາໂມກຄັນລານະເປັນຫົວໜ້າ ເດີນທາງມາເຖິງເຮືອນຈາຕຸມາເພື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ພິກຂຸອາຄັນຕຸກະເຫຼົ່ານັ້ນສົນທະນາປາໄສກັບພິກຂຸເຈົ້າຖິ່ນ ຈັດເສນາສະນະ ເກັບບາດແລະຈີວອນຢູ່ ສົ່ງສຽງດັງອື້ອຶງ ຂ້ານ້ອຍ"

"ອານົນ ຖ້າເຊັ່ນນັ້ນ ທ່ານຈົ່ງໄປຮຽກພິກຂຸເຫຼົ່ານັ້ນມາຕາມຄຳຂອງເຮົາວ່າ "ພຣະສາດສະດາຕັດຮຽກຫາທ່ານທັງຫລາຍ"

ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ ຈຶ່ງເຂົ້າໄປຫາພິກຂຸເຫຼົ່ານັ້ນເຖິງທີ່ພັກໄດ້ກ່າວກັບພິກຂຸເຫຼົ່ານັ້ນວ່າ "ພຣະສາດສະດາຕັດຮຽກຫາທ່ານທັງຫລາຍ"

ພິກຂຸເຫຼົ່ານັ້ນ ຮັບຄຳແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຕັດກັບພິກຂຸເຫຼົ່ານັ້ນວ່າ "ພິກຂຸທັງຫລາຍ ທ່ານທັງຫລາຍພາກັນສົ່ງສຽງດັງອື້ອຶງ ຄືຊາວປະມົງແຍ່ງປາກັນບໍ?"

ພິກຂຸເຫຼົ່ານັ້ນຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸປະມານ ໕໐໐ ອົງ ມີທ່ານພຣະສາຣີບຸດແລະທ່ານພຣະມະຫາໂມກຄັນລານະເປັນຫົວໜ້າ ເດີນທາງມາເຖິງເຮືອນຈາຕຸມາເພື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ພິກຂຸອາຄັນຕຸກະເຫຼົ່ານັ້ນປາໄສກັບພິກຂຸເຈົ້າຖິ່ນ ຈັດເສນາສະນະ ເກັບບາດແລະຈີວອນຢູ່ ສົ່ງສຽງດັງອື້ອຶງ ຂ້ານ້ອຍ"

"ພິກຂຸທັງຫລາຍ ທ່ານທັງຫລາຍຈົ່ງໄປ ເຮົາຂໍຂັບໄລ່ພວກທ່ານທັງຫລາຍ ທ່ານທັງຫລາຍ ບໍ່ຄວນຢູ່ໃນສຳນັກຂອງເຮົາ"

ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ລຸກຈາກອາສະນະຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວເກັບເສນາສະນະ ຖືບາດແລະຈີວອນຈາກໄປ

[໑໕໗] ສະໄໝນັ້ນ ເຈົ້າສາກະຍະຊາວບ້ານຈາຕຸມາ ມາປະຊຸມກັນຢູ່ທີ່ຫໍປະຊຸມດ້ວຍວຽກງານບາງຢ່າງ ໄດ້ເຫັນພິກຂຸເຫຼົ່ານັ້ນຍ່າງມາແຕ່ໄກ ຈຶ່ງເຂົ້າໄປຫາພິກຂຸເຫຼົ່ານັ້ນ ຮອດບ່ອນຢູ່ ໄດ້

ກ່າວກັບພິກຂຸເຫຼົ່ານັ້ນວ່າ "ພຣະຄຸນທ່ານທັງຫລາຍ ທ່ານທັງຫລາຍຈະພາກັນໄປໄສນໍ?"

ພິກຂຸເຫຼົ່ານັ້ນ ກ່າວວ່າ "ທ່ານຜູ້ມີອາຍຸທັງຫລາຍ ພິກຂຸສົງຖືກພຣະຜູ້ມີພຣະພາກເຈົ້າຊົງຂັບໄລ່ແລ້ວ"

"ພຣະຄຸນທ່ານທັງຫລາຍ ຖ້າເຊັ່ນນັ້ນ ຂໍທ່ານທັງຫລາຍຈົ່ງນັ່ງຢູ່ບ່ອນນີ້ຈັກນ້ອຍໜຶ່ງ ບາງເທື່ອພວກຂ້າພະເຈົ້າອາດຈະເວົ້າໃຫ້ພຣະຜູ້ມີພຣະພາກເຈົ້າຊົງພໍພຣະທະໄທໄດ້"

ພິກຂຸເຫຼົ່ານັ້ນຮັບຄໍາແລ້ວ ລໍາດັບນັ້ນ ພວກເຈົ້າສາກະຍະຊາວບ້ານຈາຕຸມາເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນ ພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຊົມຊື່ນພິກຂຸສົງ ຂໍຈົງຮັບສັ່ງກັບພິກຂຸສົງເທີ້ນ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງອະນຸເຄາະພິກຂຸສົງໃນບັດນີ້ ຄືແນວ ທີ່ເຄີຍຊົງອະນຸເຄາະໃນການກ່ອນດ້ວຍເທີ້ນ ໃນພິກຂຸສົງນີ້ ພິກຂຸທັງຫລາຍທີ່ຍັງເປັນນະວະກະບວດບໍ່ດົນເພິ່ງມາສູ່ພຣະທໍາວິໄນນີ້ກໍມີຢູ່ ເມື່ອພິກຂຸເຫຼົ່ານັ້ນບໍ່ໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ຈະເພິ່ງມີຄວາມນ້ອຍໃຈ ມີຄວາມຜັນແປໄປ

ພືດທີ່ຍັງອ່ອນເມື່ອຂາດນໍ້າກໍຈະຫ່ຽວເສົາແປປ່ຽນສພາບໄປ ແມ່ນສັນໃດ ໃນພິກຂຸສົງນີ້ ພິກຂຸທັງຫລາຍທີ່ຍັງເປັນນະວະກະບວດບໍ່ດົນ ເພິ່ງມາສູ່ພຣະທໍາວິໄນນີ້ມີຢູ່ ກໍສັນນັ້ນຄືກັນ ເມື່ອພິກຂຸເຫຼົ່ານັ້ນບໍ່ໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ຈະເພິ່ງມີຄວາມນ້ອຍໃຈ ມີຄວາມຜັນແປໄປ

ງົວນ້ອຍອ່ອນເມື່ອບໍ່ເຫັນແມ່ກໍຈະຮ້ອງຫາຫ່ຽວຊົມຊານໄປ ແມ່ນສັນໃດ ໃນພິກຂຸສົງນີ້ ພິກຂຸທັງຫລາຍທີ່ຍັງເປັນນະວະກະບວດບໍ່ດົນ ເພິ່ງມາສູ່ພຣະທໍາວິໄນນີ້ມີຢູ່ ກໍສັນນັ້ນຄືກັນ ເມື່ອພິກຂຸເຫຼົ່ານັ້ນບໍ່ໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ຈະເພິ່ງມີຄວາມນ້ອຍໃຈ ມີຄວາມຜັນແປໄປ

ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຊົມຊື່ນພິກຂຸສົງ ຂໍຈົງຮັບສັ່ງກັບພິກຂຸສົງເທີ້ນ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງອະນຸເຄາະພິກຂຸສົງໃນບັດນີ້ ຄືແນວ ທີ່ເຄີຍຊົງອະນຸເຄາະໃນການກ່ອນດ້ວຍເທີ້ນ"

## ພົມອາຣາດທະນາພຣະພຸດທະເຈົ້າ

[໑໕໗] ຄັ້ງນັ້ນ ທ້າວສະຫໍາບໍດີພົມຊົງຮູ້ຄວາມລໍາພຶງໃນພຣະທະໄທຂອງພຣະ ຜູ້ມີພຣະພາກດ້ວຍໃຈຂອງຕົນແລ້ວ ໄດ້ອັນຕະຣະທານຈາກພົມມະໂລກມາຜາກົດໃນບ່ອນສະເພາະພຣະພັກຂອງພຣະຜູ້ມີພຣະພາກເຈົ້າ ປຽບຄືຄົນທີ່ແຂງແຮງຢຽດແຂນອອກຫຼືຄູ້ແຂນເຂົ້າ ແລ້ວຫົ່ມຜ້າ

ບ່ງງບ່າ ປະນົມມືໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໄດ້ຂາບທູນ ວ່າ

"ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຊົມຊື່ນພິກຂຸສົງ ຂໍຈົ່ງຮັບສັ່ງກັບພິກຂຸສົງເທີ້ນ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງອະນຸເຄາະພິກຂຸສົງໃນບັດນີ້ ຄືກັບທີ່ເຄີຍຊົງອະນຸເຄາະ ໃນການກ່ອນດ້ວຍເທີ້ນ ໃນພິກຂຸສົງນີ້ ພິກຂຸທັງຫລາຍທີ່ຍັງເປັນນະວະກະ ບວດບໍ່ດົນ ເພິ່ງມາສູ່ພຣະທຳວິໄນນີ້ກໍມີຢູ່ ເມື່ອພິກຂຸເຫຼົ່ານັ້ນບໍ່ໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ຈະເພິ່ງມີຄວາມນ້ອຍໃຈ ມີຄວາມຜັນແປໄປ

ພືດທີ່ຍັງອ່ອນເມື່ອຂາດນ້ຳກໍຈະຫ່ຽວເສົາແປປ່ຽນສພາບໄປ ແມ່ນສັນໃດ ໃນພິກຂຸສົງນີ້ ພິກຂຸທັງຫລາຍທີ່ຍັງເປັນນະວະກະ ບວດບໍ່ດົນ ເພິ່ງມາສູ່ພຣະທຳວິໄນນີ້ມີຢູ່ ກໍສັນນັ້ນ ຄືກັນ ເມື່ອພິກຂຸເຫຼົ່ານັ້ນບໍ່ໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ຈະເພິ່ງມີຄວາມນ້ອຍໃຈ ມີຄວາມຜັນແປໄປ

ງົວນ້ອຍ ອ່ອນເມື່ອບໍ່ເຫັນແມ່ກໍຈະຮ້ອງຫາຫ່ຽວຊົມຊານໄປ ແມ່ນສັນໃດ ໃນພິກຂຸສົງນີ້ ພິກຂຸທັງຫລາຍທີ່ຍັງເປັນນະວະກະບວດບໍ່ດົນ ເພິ່ງມາສູ່ພຣະທຳວິໄນນີ້ມີຢູ່ ກໍສັນນັ້ນ ຄືກັນ ເມື່ອພິກຂຸເຫຼົ່ານັ້ນບໍ່ໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ຈະເພິ່ງມີຄວາມນ້ອຍໃຈ ມີຄວາມຜັນແປໄປ

ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຊົມຊື່ນພິກຂຸສົງ ຂໍຈົ່ງຮັບສັ່ງກັບພິກຂຸສົງເທີ້ນ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງອະນຸເຄາະພິກຂຸສົງໃນບັດນີ້ ຄືກັບ ທີ່ເຄີຍຊົງອະນຸເຄາະໃນການກ່ອນດ້ວຍເທີ້ນ໑ ຂ້ານ້ອຍ"

[໑໖໐] ເຈົ້າສາກະຍະຊາວບ້ານຈາຕຸມາ ແລະ ທ້າວສະຫຳບໍດີພົມ ສາມາດທູນຂໍໃຫ້ພຣະຜູ້ມີພຣະພາກເຈົ້າຊົງພໍພຣະທະໄທດ້ວຍຄຳວິງວອນປຽບດ້ວຍພືດທີ່ຍັງອ່ອນ ແລະ ດ້ວຍຄຳວິງວອນປຽບດ້ວຍງົວນ້ອຍອ່ອນ

ຄັ້ງນັ້ນ ທ່ານພຣະມະຫາໂມກຄັນລານະຈຶ່ງຮຽກພິກຂຸທັງຫລາຍມາກ່າວວ່າ "ທ່ານຜູ້ມີອາຍຸທັງຫລາຍ ພວກທ່ານຈົ່ງລຸກຂຶ້ນ ຈົ່ງຖືບາດແລະຈີວອນເທີ້ນ ເຈົ້າສາກະຍະຊາວເມືອງ ຈາຕຸມາ ແລະທ້າວສະຫຳບໍດີພົມໄດ້ຂາບທູນໃຫ້ພຣະຜູ້ມີພຣະພາກເຈົ້າຊົງພໍພຣະທະໄທແລ້ວ ດ້ວຍຄຳວິງວອນປຽບດ້ວຍພືດທີ່ຍັງອ່ອນ ແລະ ດ້ວຍຄຳວິງວອນປຽບດ້ວຍງົວນ້ອຍອ່ອນ"

ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ຈຶ່ງລຸກຈາກອາສະນະ ຖືບາດແລະຈີວອນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຕັດກັບທ່ານພຣະສາຣີບຸດວ່າ "ສາຣີບຸດ ເມື່ອເຮົາຂັບໄລ່ພິກຂຸສົງ ທ່ານໄດ້

ມີຄວາມຄິດແນວໃດ?"

ທ່ານພຣະສາຣີບຸດຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຂັບໄລ່ພິກຂຸສົງ ຂ້າພຣະອົງໄດ້ມີຄວາມຄິດແນວນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງຂັບໄລ່ພິກຂຸສົງແລ້ວ ບັດນີ້ ພຣະຜູ້ມີພຣະພາກເຈົ້າຈັກຊົງມີຄວາມຂົນຂວາຍໜ້ອຍ ຈະເລີນທຳເຄື່ອງຢູ່ເປັນສຸກໃນປັດຈຸບັນຢູ່ ແມ່ນເຮົາທັງຫລາຍກໍຈັກມີຄວາມຂົນຂວາຍໜ້ອຍ ຈະເລີນທຳເຄື່ອງຢູ່ເປັນສຸກໃນປັດຈຸບັນຢູ່ເຊັ່ນກັນ"

"ສາຣີບຸດ ທ່ານຈົ່ງຖ້າກ່ອນ ທ່ານຈົ່ງຖ້າກ່ອນ ທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ຈົ່ງພັກໄວ້ກ່ອນ ທ່ານບໍ່ຄວນໃຫ້ຄວາມຄິດເຫັນຢູ່ແນວນັ້ນເກີດຂຶ້ນອີກ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກທ່ານພຣະມະຫາໂມກຄັນລານະມາຕັດວ່າ "ໂມກຄັນລານະ ເມື່ອເຮົາຂັບໄລ່ພິກຂຸສົງ ທ່ານໄດ້ມີຄວາມຄິດແນວໃດ?"

ທ່ານພຣະມະຫາໂມກຄັນລານະຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຂັບໄລ່ພິກຂຸສົງ ຂ້າພຣະອົງໄດ້ມີຄວາມຄິດແນວນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງຂັບໄລ່ພິກຂຸສົງແລ້ວ ບັດນີ້ ພຣະຜູ້ມີພຣະພາກເຈົ້າຈັກຊົງມີຄວາມຂົນຂວາຍໜ້ອຍ ຈະເລີນທຳເຄື່ອງຢູ່ເປັນສຸກໃນປັດຈຸບັນຢູ່ ຂ້າພຣະອົງ ແລະ ທ່ານສາຣີບຸດຈັກຊ່ອຍກັນບໍລິຫານພິກຂຸສົງ"

"ດີແລ້ວ ດີແລ້ວ ໂມກຄັນລານະ ຄວາມຈິງ ເຮົາ ສາຣີບຸດ ຫຼື ໂມກຄັນລານະທີ່ນັ້ນຄວນບໍລິຫານພິກຂຸສົງ"

## ໄພຂອງພິກຂຸຜູ້ບວດໃໝ່ ໔ ປະການ

[໑໖໑] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫລາຍມາຕັດວ່າ

"ພິກຂຸທັງຫລາຍ ໄພ ໔ ປະການນີ້ ທີ່ຄົນລົງໄປໃນນ້ຳເພິ່ງປະສົບ

ໄພ ໔ ປະການ ອັນໃດແດ່ ຄື

໑. ອູມີໄພ (ໄພຈາກຄື້ນ)
໒. ກຸມພີລະໄພ (ໄພຈາກແຂ້)
໓. ອາວັຕຕະໄພ (ໄພຈາກນ້ຳວົນ)
໔. ສຸສຸກາໄພ (ໄພຈາກປາຮ້າຍ)

ໄພ ໔ ປະການນີ້ແລ ທີ່ຄົນລົງໄປໃນນ້ຳເພິ່ງປະສົບ ສັນໃດ

ພິກຂຸທັງຫລາຍ ໄພ ໔ ປະການນີ້ກໍສັນນັ້ນຄືກັນ ທີ່ກຸນລະບຸດລາງຄົນໃນໂລກນີ້ມີສັດທາອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນນີ້ ເພິ່ງປະສົບ

ໄພ ໔ ປະການ ອັນໃດແດ່ ຄື

໑. ອູມີໄພ ໒. ກຸມພີລະໄພ

໓. ອາວັດຕະໄພ ໔. ສຸສຸກາໄພ

[໑໖໒] ອູມີໄພ ເປັນແນວໃດ?

ຄື ກຸນລະບຸດລາງຄົນໃນໂລກນີ້ ມີສັດທາອອກຈາກເຮືອນບວດເປັນບັນພະຊິດ ຄິດວ່າ "ເຮົາຖືກຊາດ (ຄວາມເກີດ) ຊະຣາ (ຄວາມແກ່) ມໍລະນະ (ຄວາມຕາຍ) ໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມໄຫ້ຈົ່ມ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ອຸປາຍາດ (ຄວາມຄັບແຄ້ນໃຈ) ຄອບງຳ ຕົກຢູ່ໃນກອງທຸກ ມີທຸກປະດັງເຂົ້າມາ ເຮັດແນວໃດນໍ? ການເຮັດກອງທຸກທັງໝົດນີ້ໃຫ້ສິ້ນສຸດ ຈະເພິ່ງຜາກົດໄດ້" ເພື່ອນພົມມະຈາຣີຕັກເຕືອນພ່ຳສອນທ່ານຜູ້ບວດແລ້ວນັ້ນວ່າ "ທ່ານເພິ່ງກ້າວໄປແນວນີ້ ເພິ່ງຖອຍກັບແນວນີ້ ເພິ່ງແລເບິ່ງແນວນີ້ ເພິ່ງຫລຽວເບິ່ງແນວນີ້ ເພິ່ງຄູ້ເຂົ້າແນວນີ້ ເພິ່ງຢຽດອອກແນວນີ້ ເພິ່ງຄອງສັງຄາຕິ ບາດແລະຈີວອນແນວນີ້" ທ່ານຄິດແນວນີ້ວ່າ "ແຕ່ກ່ອນ ເຮົາເປັນຄະຫຼືຫັດມີແຕ່ຕັກເຕືອນ ພ່ຳສອນຜູ້ອື່ນ ກໍພິກຂຸເຫລົ່ານີ້ ມີອາຍຸສຳລູກສຳຫລານຂອງເຮົາ ຍັງຈະມາຕັກເຕືອນ ພ່ຳສອນເຮົາອີກ" ທ່ານຈຶ່ງບອກຄືນສິກຂາກັບມາເປັນຄະຫຼືຫັດຄືເກົ່າ

ນີ້ຮຽກວ່າ ພິກຂຸຜູ້ຢ້ານອູມີໄພ ບອກຄືນສິກຂາກັບມາເປັນຄະຫຼືຫັດ ຄຳວ່າ ອູມີໄພ ນີ້ ເປັນຊື່ຮຽກຄວາມໂກດ ແລະ ຄວາມຄັບແຄ້ນໃຈ

[໑໖໓] ກຸມພີລະໄພ ເປັນແນວໃດ?

ຄື ກຸນລະບຸດລາງຄົນໃນໂລກນີ້ ມີສັດທາອອກຈາກເຮືອນບວດເປັນບັນພະຊິດ ຄິດວ່າ "ເຮົາຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດຄອບງຳ ຕົກຢູ່ໃນກອງທຸກ ມີທຸກປະດັງເຂົ້າມາ ເຮັດແນວໃດນໍ? ການເຮັດກອງທຸກທັງໝົດນີ້ໃຫ້ສິ້ນສຸດ ຈະເພິ່ງຜາກົດໄດ້" ເພື່ອນພົມມະຈາຣີຕັກເຕືອນພ່ຳສອນທ່ານຜູ້ບວດແລ້ວນັ້ນວ່າ "ສິ່ງນີ້ທ່ານ ຄວນສັນ ສິ່ງນີ້ທ່ານບໍ່ຄວນສັນ ສິ່ງນີ້ທ່ານຄວນບໍຣິໂພກ ສິ່ງນີ້ທ່ານບໍ່ຄວນບໍຣິໂພກ ສິ່ງນີ້ທ່ານ ຄວນຊີມ ສິ່ງນີ້ທ່ານບໍ່ຄວນຊີມ ສິ່ງນີ້ທ່ານຄວນດື່ມ ສິ່ງນີ້ທ່ານບໍ່ຄວນດື່ມ ສິ່ງທີ່ເປັນກັບປີຍະ ທ່ານຄວນສັນ ສິ່ງທີ່ເປັນອະກັບປີຍະທ່ານບໍ່ຄວນສັນ ສິ່ງທີ່ເປັນກັບປີຍະທ່ານຄວນບໍຣິໂພກ ສິ່ງທີ່ເປັນອະກັບປີຍະທ່ານບໍ່ຄວນບໍຣິໂພກ ສິ່ງທີ່ເປັນກັບປີຍະທ່ານຄວນຊີມ ສິ່ງທີ່ເປັນອະກັບປີຍະທ່ານ ບໍ່

ຄວນຊິມ ສິ່ງທີ່ເປັນກັບປິຍະທ່ານຄວນດື່ມ ສິ່ງທີ່ເປັນອະກັບປິຍະທ່ານບໍ່ຄວນດື່ມ ສິ່ງນີ້ທ່ານຄວນສັນໃນການ ສິ່ງນີ້ທ່ານບໍ່ຄວນສັນໃນເວລາວິການ ສິ່ງນີ້ທ່ານຄວນບໍຣິໂພກໃນການ ສິ່ງນີ້ທ່ານບໍ່ຄວນບໍຣິໂພກໃນເວລາວິການ ສິ່ງນີ້ທ່ານຄວນຊິມໃນການ ສິ່ງນີ້ທ່ານບໍ່ຄວນຊິມໃນເວລາວິການ ສິ່ງນີ້ທ່ານຄວນດື່ມໃນການ ສິ່ງນີ້ທ່ານບໍ່ຄວນດື່ມໃນເວລາວິການ" ທ່ານຄິດແນວນີ້ວ່າ "ແຕ່ກ່ອນເຮົາເປັນຄະຫຼືຫັດຫຍ້ຳກິນສິ່ງທີ່ເຮົາຕ້ອງການ ບໍ່ຫຍ້ຳກິນສິ່ງທີ່ເຮົາບໍ່ຕ້ອງການ ບໍຣິໂພກສິ່ງທີ່ເຮົາຕ້ອງການ ບໍ່ບໍຣິໂພກສິ່ງທີ່ເຮົາບໍ່ຕ້ອງການ ຊິມສິ່ງທີ່ເຮົາຕ້ອງການ ບໍ່ຊິມສິ່ງທີ່ເຮົາບໍ່ ຕ້ອງການ ດື່ມສິ່ງທີ່ເຮົາຕ້ອງການ ບໍ່ດື່ມສິ່ງທີ່ເຮົາບໍ່ຕ້ອງການ ຫຍ້ຳກິນທັງສິ່ງເປັນກັບປິຍະ ແລະສິ່ງເປັນອະກັບປິຍະ ບໍຣິໂພກທັງສິ່ງເປັນກັບປິຍະແລະສິ່ງເປັນອະກັບປິຍະ ຊິມທັງສິ່ງເປັນ ກັບປິຍະແລະສິ່ງເປັນອະກັບປິຍະ ດື່ມທັງສິ່ງເປັນກັບປິຍະ ແລະ ສິ່ງເປັນອະກັບປິຍະ ຫຍ້ຳກິນທັງໃນການແລະໃນເວລາວິການ ບໍຣິໂພກທັງໃນການແລະໃນເວລາວິການ ຊິມທັງໃນການແລະໃນເວລາວິການ ດື່ມທັງໃນການແລະໃນເວລາວິການ ສິ່ງໃດທີ່ປະນີດບໍ່ວ່າຈະເປັນຂອງຫຍ້ຳຫຼືຂອງບໍຣິໂພກທີ່ຄະຫະບໍດີຜູ້ມີສັດທາຖວາຍແກ່ເຮົາທັງໃນການ ແລະ ໃນເວລາວິການ ພິກຂຸເຫລົ່ານີ້ ເຮັດຄືອັດປາກແມ່ນໃນສິ່ງຂອງເຫຼົ່ານັ້ນ" ທ່ານຈຶ່ງບອກຄືນສິກຂາກັບມາເປັນຄະຫຼືຫັດ

ນີ້ຮຽກວ່າ ພິກຂຸຜູ້ຢ້ານກຸມພິລະໄພ ບອກຄືນສິກຂາກັບມາເປັນຄະຫຼືຫັດ ຄຳວ່າ ກຸມພິລະໄພ ນີ້ ເປັນຊື່ຮຽກຄວາມເປັນຄົນເຫັນແກ່ປາກທ້ອງ

[໑໖໔] ອາວັຕຕະໄພ ເປັນແນວໃດ?

ຄື ກຸນລະບຸດລາງຄົນໃນໂລກນີ້ ມີສັດທາອອກຈາກເຮືອນບວດເປັນບັນພະຊິດ ຄິດວ່າ "ເຮົາຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດຄອບງຳ ຕົກຢູ່ໃນກອງທຸກ ມີທຸກປະດັງເຂົ້າມາ ເປັນຫຍັງນໍ ການເຮັດກອງທຸກທັງໝົດນີ້ໃຫ້ສິ້ນສຸດ ຈະເພິ່ງຜາກົດ" ທ່ານບວດຢູ່ແນວນີ້ ໃນເວລາເຊົ້າຄອງອັນຕະຣະວາສົກ ຖືບາດແລະຈີວອນ ເຂົ້າໄປບິນທະບາດຕາມໝູ່ບ້ານຫຼືເຂດ ບໍ່ຖືຮັກສາກາຍ ບໍ່ຖືຮັກສາວາຈາ ມີສະຕິບໍ່ຕັ້ງໝັ້ນ ບໍ່ສັງລວມອິນຊີ ທ່ານເຫັນຄະຫະບໍດີຫຼືບຸດຄະຫະບໍດີໃນໝູ່ບ້ານຫຼືເຂດນັ້ນ ຜູ້ເອີບອີ່ມ ພ້ຽບພ້ອມ ປິ່ນເປີຕົນດ້ວຍການມະຄຸນ ໕ ປະການ ຄິດແນວນີ້ວ່າ "ແຕ່ກ່ອນເຮົາເປັນຄະຫຼືຫັດຜູ້ເອີບອີ່ມ ພ້ຽບພ້ອມ ປິ່ນເປີຕົນດ້ວຍການມະຄຸນ ໕ ປະການ ໂພຄະຊັບໃນ ຕະກູນຂອງເຮົາກໍມີຢູ່ພ້ອມ ເຮົາສາມາດທີ່ຈະໃຊ້ສອຍໂພຄະຊັບແລະເຮັດບຸນໄດ້ ທ່ານຈຶ່ງບອກຄືນສິກຂາກັບມາເປັນຄະຫຼືຫັດ

ນີ້ຮຽກວ່າ ພິກຂຸຜູ້ຢ້ານອາວັຕຕະໄພ ບອກຄືນສິກຂາກັບມາເປັນຄະຫຼືຫັດ ຄຳວ່າ ອາວັດຕະໄພ ນີ້ ເປັນຊື່ຮຽກ ການມະຄຸນ ໕ ປະການ

[໑໖໕] ສຸສຸກາໄພ ເປັນແນວໃດ?

ຄື ກຸນລະບຸດລາງຄົນໃນໂລກນີ້ ມີສັດທາອອກຈາກເຮືອນບວດເປັນບັນພະຊິດ ຄິດວ່າ "ເຮົາຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດຄອບງຳ ຕົກຢູ່ໃນກອງທຸກ ມີທຸກປະດັງເຂົ້າມາ ເປັນທຍັງນໍ ການເຮັດກອງທຸກທັງໝົດນີ້ໃຫ້ສິ້ນສຸດ ຈະເພິ່ງຜາກົດ" ທ່ານບວດຢູ່ແນວນີ້ ໃນເວລາເຊົ້າຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະບາດຕາມໝູ່ບ້ານຫຼືເຂດ ບໍ່ຖືຮັກສາກາຍ ບໍ່ຖືຮັກສາວາຈາ ມີສະຕິບໍ່ຕັ້ງໝັ້ນ ບໍ່ສັງລວມອິນຊີ ທ່ານເຫັນມາຕຸຄາມ (ສະຕີ) ໃນໝູ່ບ້ານຫຼືນິຄົມນັ້ນ ນຸ່ງບໍ່ຮຽບຮ້ອຍ ຫຼື ຫົ່ມບໍ່ຮຽບຮ້ອຍ ຣາຄະລົບກວນຈິດຂອງທ່ານ ຍ້ອນເຫັນມາຕຸຄາມນຸ່ງບໍ່ຮຽບຮ້ອຍ ຫຼື ຫົ່ມບໍ່ຮຽບຮ້ອຍ ທ່ານມີຈິດຟຸ້ງຊ່ານຍ້ອນຣາຄະ ຈຶ່ງບອກຄືນສິກຂາກັບມາເປັນຄະຫຼືຫັດ

ນີ້ຮຽກວ່າ ພິກຂຸຜູ້ຢ້ານສຸສຸກາໄພ ບອກຄືນສິກຂາກັບມາເປັນຄະຫຼືຫັດ ຄຳວ່າ ສຸສຸກາໄພນີ້ ເປັນຊື່ຮຽກ ມາຕຸຄາມ (ແມ່ຍິງ)

ພິກຂຸທັງຫລາຍ ໄພ ໔ ປະການນີ້ແລ ທີ່ກຸນລະບຸດລາງຄົນໃນໂລກນີ້ ມີສັດທາອອກຈາກເຮືອນບວດເປັນບັນພະຊິດໃນທຳວິໄນ ນີ້ເພິ່ງປະສົບ໑"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດ ຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ຈາຕຸມະສູດທີ່ ໗ ຈົບ**

# ໘. ນະລະກະປານະສູດ

## ວ່າດ້ວຍເຫດການໃນໝູ່ບ້ານນະລະກະປານະ

## ກຸນລະບຸດຜູ້ມີຊື່ສຽງອອກບວດ

[໑໖໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນປ່າໄມ້ຄຳກວາວ ໝູ່ບ້ານນະລະກະປານະແຄວ້ນໂກສົນ ສະໄໝນັ້ນແລ ກຸນລະບຸດຜູ້ມີຊື່ສຽງຈຳນວນຫຼາຍ ຄື ທ່ານພຣະອະນຸຣຸດທະ ທ່ານພຣະພັດທະຍະ ທ່ານພຣະກິມະພິລະ ທ່ານພຣະພັກຄຸ ທ່ານພຣະໂກນທັນຍະ ທ່ານພຣະເຣວະຕະ ທ່ານພຣະອານົນ ແລະ ກຸນລະບຸດທີ່ມີຊື່ສຽງອື່ນ ໆ ມີສັດທາອອກຈາກເຮືອນບວດເປັນບັນພະຊິດອຸທິດພຣະຜູ້ມີພຣະພາກເຈົ້າ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າ ມີໝູ່ພິກຂຸຮ້ອມລ້ອມແລ້ວປະທັບນັ່ງຢູ່ທີ່ທີ່ກາງແຈ້ງ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຜາຣົບກຸນລະບຸດເຫຼົ່ານັ້ນ ຮັບສັ່ງຮຽກພິກຂຸທັງຫລາຍມາ ຕັດວ່າ "ພິກຂຸທັງຫລາຍ ກຸນລະບຸດຜູ້ມີສັດທາອອກຈາກເຮືອນບວດເປັນບັນພະຊິດອຸທິດເຮົານັ້ນ ຍັງຍິນດີໃນພົມມະຈັນຢູ່ບໍ?"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸເຫຼົ່ານັ້ນ ໄດ້ພາກັນນິ່ງຢູ່

ແມ່ນເທື່ອທີ ໒ ພຣະຜູ້ມີພຣະພາກເຈົ້າກໍຊົງຜາຣົບກຸນລະບຸດເຫຼົ່ານັ້ນ ຮັບສັ່ງຮຽກພິກຂຸທັງຫລາຍມາຕັດວ່າ "ພິກຂຸທັງຫລາຍ ກຸນລະບຸດຜູ້ມີສັດທາອອກຈາກເຮືອນບວດເປັນບັນພະຊິດອຸທິດເຮົານັ້ນ ຍັງຍິນດີໃນພົມມະຈັນຢູ່ບໍ?"

ແມ່ນເທື່ອທີ ໒ ພິກຂຸເຫຼົ່ານັ້ນ ກໍພາກັນນິ່ງຢູ່

ແມ່ນເທື່ອທີ ໓ ພຣະຜູ້ມີພຣະພາກເຈົ້າກໍຊົງຜາຣົບກຸນລະບຸດເຫຼົ່ານັ້ນ ຮັບສັ່ງຮຽກພິກຂຸທັງຫລາຍມາຕັດວ່າ "ພິກຂຸທັງຫລາຍ ກຸນລະບຸດຜູ້ມີສັດທາອອກຈາກເຮືອນບວດເປັນ ບັນພະຊິດອຸທິດເຮົານັ້ນ ຍັງຍິນດີໃນພົມມະຈັນຢູ່ບໍ?"

ແມ່ນເທື່ອທີ ໓ ພິກຂຸເຫຼົ່ານັ້ນກໍພາກັນນິ່ງຢູ່

[໑໙໗] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງດຳຣິວ່າ "ທາງທີ່ດີ ເຮົາຄວນຖາມກຸນລະບຸດເຫຼົ່ານັ້ນເບິ່ງ" ແລ້ວໄດ້ຮັບສັ່ງຮຽກທ່ານພຣະອະນຸຣຸດທະມາຕັດວ່າ "ອະນຸຣຸດທະທ່ານທັງຫລາຍ ຍັງຍິນດີໃນພົມມະຈັນຢູ່ບໍ?"

ທ່ານພຣະອະນຸຣຸດທະຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫລາຍຍັງຍິນດີໃນພົມມະຈັນຢູ່"

"ດີແລ້ວ ດີແລ້ວ ອະນຸຣຸດທະ ການທີ່ທ່ານທັງຫລາຍຍິນດີໃນພົມມະຈັນນີ້ແລ ເປັນການສົມຄວນແກ່ທ່ານທັງຫລາຍຜູ້ເປັນກຸນລະບຸດ ມີສັດທາອອກຈາກເຮືອນບວດເປັນບັນພະຊິດ ຍ້ອນທ່ານທັງຫລາຍ ກຳລັງໜຸ່ມແໜ້ນ ມີຜົມດຳປອດ ຈະເລີນຢູ່ໃນປະຖົມວັຍສົມຄວນບໍຣິໂພກການຍັງອອກຈາກເຮືອນບວດເປັນບັນພະຊິດໄດ້ ທ່ານທັງຫລາຍນັ້ນບໍ່ແມ່ນຜູ້ທຳຄວາມຜິດຕໍ່ພຣະຣາຊາຈຶ່ງອອກຈາກເຮືອນບວດເປັນບັນພະຊິດ ບໍ່ແມ່ນຜູ້ຖືກຕາມຈັບວ່າເປັນໂຈນຈຶ່ງອອກຈາກເຮືອນບວດເປັນບັນພະຊິດ ບໍ່ແມ່ນຖືກໜີ້ສິນບີບຄັ້ນຈຶ່ງອອກຈາກເຮືອນບວດເປັນບັນພະຊິດ ບໍ່ແມ່ນເດືອດຮ້ອນຍ້ອນໄພຈຶ່ງອອກຈາກເຮືອນບວດເປັນບັນພະຊິດ ບໍ່ແມ່ນຖືກອາຊີບບີບຄັ້ນຈຶ່ງອອກຈາກເຮືອນບວດເປັນບັນພະຊິດ ຄວາມຈິງ ທ່ານທັງຫລາຍມີສັດທາອອກຈາກເຮືອນບວດເປັນບັນພະຊິດ ດ້ວຍຄວາມຄິດແນວນີ້ວ່າ "ເຮົາເປັນຜູ້ຖືກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ

ທຸກ ໂທມະນັດ ອຸປາຍາດ ຄອບງຳແລ້ວ ຕົກຢູ່ໃນກອງທຸກ ມີທຸກປະດັງເຂົ້າມາ ເຮັດແນວໃດນໍ ການເຮັດ ກອງທຸກທັງໝົດນີ້ໃຫ້ສິ້ນສຸດຈະເພິ່ງຜາກົດ" ບໍ່ແມ່ນບໍ?"

"ແມ່ນ ຂ້ານ້ອຍ"

ກຸນລະບຸດຜູ້ບວດແລ້ວແນວນີ້ຄວນເຮັດກິດອັນໃດແດ່

ຄື ກຸນລະບຸດ ຍັງບໍ່ບັນລຸປີຕິແລະສຸກ ຫຼື ສຸກອື່ນທີ່ລະອຽດກວ່ານັ້ນອັນສະຫງັດຈາກການ ແລະອະກຸສົນທຳທັງຫລາຍ ແມ່ນອະພິດຊາກໍຍັງຄອບງຳຈິດຂອງກຸນລະບຸດນັ້ນຢູ່ ແມ່ນພະຍາບາດກໍຍັງຄອບງຳຈິດຂອງກຸນລະບຸດນັ້ນຢູ່ ແມ່ນຖີນະມິດທະກໍຍັງຄອບງຳຈິດຂອງກຸນລະບຸດນັ້ນຢູ່ ແມ່ນອຸດທັດຈະກຸກກຸດຈະກໍຍັງຄອບງຳຈິດຂອງກຸນລະບຸດນັ້ນຢູ່ ແມ່ນວິຈິກິດສາກໍຍັງຄອບງຳຈິດຂອງກຸນລະບຸດນັ້ນຢູ່ ແມ່ນຄວາມຣິດສະຫຍາກໍຍັງຄອບງຳຈິດຂອງກຸນລະບຸດນັ້ນຢູ່ ແມ່ນຄວາມເປັນຜູ້ຂີ້ຄ້ານກໍຍັງຄອບງຳຈິດຂອງກຸນລະບຸດນັ້ນຢູ່ ກຸນລະບຸດນັ້ນ ຍັງບໍ່ບັນລຸປີຕິແລະສຸກ ຫຼືສຸກອື່ນທີ່ລະອຽດກວ່ານັ້ນອັນສະຫງັດຈາກການ ແລະອະກຸສົນທຳທັງຫລາຍ

ອະນຸຣຸດທະ ກຸນລະບຸດບັນລຸປີຕິແລະສຸກ ຫຼື ສຸກອື່ນທີ່ລະອຽດກວ່ານັ້ນອັນສະຫງັດຈາກການ ແລະ ອະກຸສົນທຳທັງຫລາຍ ແມ່ນອະພິດຊາກໍຄອບງຳຈິດຂອງກຸນລະບຸດນັ້ນຢູ່ບໍ່ໄດ້ ແມ່ນພະຍາບາດ ກໍຄອບງຳຈິດຂອງກຸນລະບຸດນັ້ນຢູ່ບໍ່ໄດ້ ແມ່ນຖີນະມິດທະກໍຄອບງຳຈິດຂອງກຸນລະບຸດນັ້ນຢູ່ບໍ່ໄດ້ ແມ່ນອຸດທັດຈະກຸກກຸດຈະກໍຄອບງຳຈິດຂອງກຸນລະບຸດນັ້ນຢູ່ບໍ່ໄດ້ ແມ່ນວິຈິກິດສາກໍຄອບງຳ ຈິດຂອງກຸນລະບຸດນັ້ນຢູ່ບໍ່ໄດ້ ແມ່ນຄວາມຣິດສະຫຍາກໍຄອບງຳຈິດຂອງກຸນລະບຸດນັ້ນຢູ່ບໍ່ໄດ້ ແມ່ນຄວາມເປັນຜູ້ຂີ້ຄ້ານກໍຄອບງຳຈິດຂອງກຸນລະບຸດນັ້ນຢູ່ບໍ່ໄດ້ ກຸນລະບຸດນັ້ນບັນລຸປີຕິແລະສຸກ ຫຼື ສຸກອື່ນທີ່ລະອຽດກວ່ານັ້ນອັນສະຫງັດຈາກການ ແລະອະກຸສົນທຳທັງຫລາຍໄດ້

## ພຣະຕະຖາຄົດກັບອາສະວະ

[໑໖໗] ອະນຸຣຸດທະ ທ່ານທັງຫລາຍຈະຄິດແນວໃດໃນເຮົາວ່າ "ຕະຖາຄົດຍັງລະອາສະວະ ອັນເຮັດໃຫ້ເສົ້າໝອງ ໃຫ້ເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີວິບາກເປັນທຸກ ໃຫ້ມີຊາດ ຊະຣາ ແລະ ມໍລະນະຕໍ່ໄປບໍ່ໄດ້ ຍ້ອນເຫດນັ້ນ ຕະຖາຄົດພິຈາລະນາແລ້ວຈຶ່ງເສບຂອງແນວໜຶ່ງ ອົດກັ້ນຂອງແນວໜຶ່ງ ເວັ້ນຂອງແນວໜຶ່ງ ບັນເທົາຂອງແນວໜຶ່ງແດ່ບໍ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ໄດ້ຄິດໃນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ພຣະຕະຖາຄົດຍັງຊົງລະອາສະວະອັນເຮັດໃຫ້ເສົ້າໝອງ ໃຫ້ເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີວິບາກເປັນທຸກ ໃຫ້ມີຊາດ ຊະຣາ ແລະ ມໍລະນະຕໍ່ໄປບໍ່ໄດ້ ຍ້ອນເຫດນັ້ນ ພຣະຕະຖາຄົດພິຈາລະນາແລ້ວຈຶ່ງຊົງເສບຂອງແນວໜຶ່ງ ອົດກັ້ນຂອງແນວໜຶ່ງ ເວັ້ນຂອງແນວໜຶ່ງບັນເທົາຂອງແນວໜຶ່ງ"

ແຕ່ຂ້າພຣະອົງທັງຫລາຍໄດ້ຄິດໃນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ພຣະຕະຖາຄົດຊົງລະອາສະວະອັນເຮັດໃຫ້ເສົ້າໝອງ ໃຫ້ເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີວິບາກ ເປັນທຸກ ໃຫ້ມີຊາດ ຊະຣາ ແລະ ມໍລະນະຕໍ່ໄປໄດ້ແລ້ວ ຍ້ອນເຫດນັ້ນ ພຣະຕະຖາຄົດພິຈາລະນາແລ້ວຈຶ່ງຊົງເສບຂອງແນວໜຶ່ງ ອົດກັ້ນຂອງແນວໜຶ່ງ ເວັ້ນຂອງແນວໜຶ່ງ ບັນເທົາຂອງແນວໜຶ່ງ ຂ້ານ້ອຍ"

"ດີແລ້ວ ດີແລ້ວ ອະນຸຣຸດທະ ຕະຖາຄົດລະອາສະວະອັນເຮັດໃຫ້ເສົ້າໝອງ ໃຫ້ເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີວິບາກເປັນທຸກ ໃຫ້ມີຊາດ ຊະຣາ ແລະ ມໍລະນະຕໍ່ໄປໄດ້ແລ້ວ ຕັດຮາກຖອນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກຖອນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີເກີດຂຶ້ນຕໍ່ໄປບໍ່ໄດ້ ຕົ້ນຕານທີ່ຖືກຕັດຍອດແລ້ວບໍ່ອາດງອກຂຶ້ນອີກໄດ້ ແມ່ນສັນໃດ ຕະຖາຄົດກໍສັນນັ້ນຄືກັນ ລະອາສະວະອັນເຮັດໃຫ້ເສົ້າໝອງ ໃຫ້ເກີດໃນພົບໃໝ່ ມີຄວາມກະວົນ ກະວາຍມີວິບາກເປັນທຸກ ໃຫ້ມີຊາດ ຊະຣາ ແລະ ມໍລະນະຕໍ່ໄປໄດ້ແລ້ວ ຕັດຮາກຖອນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກຖອນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປ ບໍ່ໄດ້ ຍ້ອນເຫດນັ້ນຕະຖາຄົດພິຈາລະນາແລ້ວຈຶ່ງເສບຂອງແນວໜຶ່ງ ອົດກັ້ນຂອງແນວໜຶ່ງ ເວັ້ນຂອງແນວໜຶ່ງບັນເທົາຂອງແນວໜຶ່ງ

ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຕະຖາຄົດພິຈາລະນາເຫັນອຳນາດປະໂຫຍດອັນໃດຈຶ່ງພະຍາກອນສາວົກທັງຫລາຍຜູ້ລ່ວງລັບໄປແລ້ວໃນພົບທີ່ເກີດທັງຫລາຍວ່າ "ສາວົກຊື່ນັ້ນເກີດໃນພົບຊື່ນັ້ນ ສາວົກຊື່ນັ້ນເກີດໃນພົບຊື່ນັ້ນ"

"ທຳຂອງຂ້າພຣະອົງທັງຫລາຍມີພຣະຜູ້ມີພຣະພາກເຈົ້າເປັນຫລັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ມີພຣະຜູ້ມີພຣະພາກເຈົ້າເປັນທີ່ເພິ່ງ ສົມຄວນແລ້ວຂ້ານ້ອຍ ຂໍພຣະຜູ້ມີພຣະພາກເຈົ້າຊົງໂປດອະທິບາຍເນື້ອຄວາມແຫ່ງພຣະພາສິດນີ້ໃຫ້ແຈ້ງຊັດເທີ້ນ ພິກຂຸທັງຫລາຍໄດ້ຟັງຄຳອະທິບາຍຂອງພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້ ຂ້ານ້ອຍ"

"ອະນຸຣຸດທະ ຕະຖາຄົດຈະພະຍາກອນສາວົກທັງຫລາຍຜູ້ລ່ວງລັບໄປແລ້ວໃນພົບທີ່ເກີດທັງຫລາຍ ວ່າ "ສາວົກຊື່ນັ້ນເກີດໃນພົບນັ້ນ ສາວົກຊື່ນັ້ນເກີດໃນພົບນັ້ນ" ເພື່ອໃຫ້ຄົນເກີດຄວາມພິສວງກໍບໍ່ແມ່ນ ເພື່ອເກ້ຍກ່ອມຄົນກໍບໍ່ແມ່ນ ເພື່ອອານິສົງຄືລາບສັກກາຣະແລະຄວາມສັນເສີນກໍບໍ່ແມ່ນ ຫຼື ດ້ວຍຄວາມປະສົງວ່າ "ຄົນຈົ່ງຮູ້ຈັກເຮົາດ້ວຍເຫດນີ້" ກໍບໍ່ແມ່ນ

ອະນຸຣຸດທະ ກຸນລະບຸດຜູ້ມີສັດທາ ມີຄວາມຍິນດີຫຼາຍ ມີຄວາມປາໂມດຫຼາຍ ມີຢູ່ ກຸນລະບຸດເຫຼົ່ານັ້ນ ໄດ້ຟັງຄຳພະຍາກອນນັ້ນແລ້ວ ຈະນ້ອມຈິດໄປເພື່ອຄວາມເປັນແນວນັ້ນ ຂໍ້ນັ້ນຈະເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອສຸກແກ່ກຸນລະບຸດເຫຼົ່ານັ້ນຕະຫຼອດການລະນານ

# ການຢູ່ຢ່າງຜາສຸກຂອງພິກຂຸ

[໑໖໙] ອະນຸຣຸດທະ ພິກຂຸໃນທຳວິໄນນີ້ໄດ້ຟັງວ່າ "ພິກຂຸຊື່ນີ້ມໍຣະນະພາບແລ້ວ ໄດ້ຮັບພະຍາກອນຈາກພຣະຜູ້ມີພຣະພາກເຈົ້າວ່າ "ທ່ານຮູບນັ້ນດຳລົງຢູ່ໃນອະຣະຫັດຕະຜົນ" ພິກຂຸນັ້ນໄດ້ເຫັນເອງຫຼືໄດ້ຟັງມາວ່າ "ທ່ານຮູບນັ້ນເປັນຜູ້ມີສີນແບບນີ້ ທ່ານຮູບນັ້ນເປັນຜູ້ມີທຳແບບນີ້ ທ່ານຮູບນັ້ນ ເປັນຜູ້ມີປັນຍາແບບນີ້ ທ່ານຮູບນັ້ນເປັນຜູ້ມີວິຫານທຳແບບນີ້ ທ່ານຮູບນັ້ນເປັນຜູ້ລຸດພົ້ນແລ້ວແບບນີ້" ພິກຂຸນັ້ນ ເມື່ອຣະນຶກເຖິງສັດທາ ສີນ ສຸຕະ ຈາຄະ ແລະ ປັນຍາຂອງທ່ານຮູບນັ້ນ ກໍຈະນ້ອມຈິດໄປເພື່ອສັດທາເປັນຕົ້ນນັ້ນ ການຢູ່ຢ່າງຜາສຸກຍ່ອມມີແກ່ພິກຂຸ ດ້ວຍປະການດັ່ງນີ້ແລ

ພິກຂຸໃນທຳວິໄນນີ້ໄດ້ຟັງວ່າ "ພິກຂຸຊື່ນີ້ມໍຣະນະພາບແລ້ວ ໄດ້ຮັບພະຍາກອນຈາກພຣະຜູ້ມີພຣະພາກເຈົ້າວ່າ "ທ່ານຮູບນັ້ນ ເປັນໂອປະປາຕິກະ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ" ພິກຂຸນັ້ນ ໄດ້ເຫັນເອງຫຼື ໄດ້ຟັງມາວ່າ "ທ່ານຮູບນັ້ນເປັນຜູ້ມີສີນແບບນີ້ ຯລຯ ເປັນຜູ້ມີທຳແບບນີ້ ຯລຯ ເປັນຜູ້ມີປັນຍາແບບນີ້ ຯລຯ ເປັນຜູ້ມີວິຫານທຳແບບນີ້ ທ່ານຮູບນັ້ນເປັນຜູ້ລຸດພົ້ນແລ້ວແບບນີ້" ພິກຂຸນັ້ນເມື່ອຣະນຶກເຖິງສັດທາ ສີນ ສຸຕະ ຈາຄະ ແລະ ປັນຍາຂອງທ່ານຮູບນັ້ນ ກໍຈະນ້ອມຈິດໄປເພື່ອສັດທາເປັນ ຕົ້ນນັ້ນ ການຢູ່ຢ່າງຜາສຸກຍ່ອມມີແກ່ພິກຂຸ ດ້ວຍປະການ ສະນີ້ແລ

ພິກຂຸໃນທຳວິໄນນີ້ໄດ້ຟັງວ່າ "ພິກຂຸຊື່ນີ້ມໍຣະນະພາບແລ້ວ ໄດ້ຮັບພະຍາກອນຈາກພຣະຜູ້ມີພຣະພາກເຈົ້າວ່າ "ທ່ານຮູບນັ້ນເປັນສະກະທາຄາມີ ຍ້ອນສັງໂຍດ ໓ ປະການສິ້ນໄປແລະຍ້ອນຣາຄະ ໂທສະ ໂມຫະ ເບົາບາງ ຈັກກັບມາສູ່ໂລກນີ້ອີກເທື່ອດຽວແລ້ວຈະເຮັດທີ່ສຸດແຫ່ງທຸກໄດ້" ພິກຂຸນັ້ນ ໄດ້ເຫັນເອງຫຼືໄດ້ຟັງມາວ່າ "ທ່ານຮູບນັ້ນເປັນຜູ້ມີສີນແບບນີ້ ຯລຯ ເປັນຜູ້ມີທຳແບບນີ້ ຯລຯ ເປັນຜູ້ມີປັນຍາແບບນີ້ຯລຯ ເປັນຜູ້ມີວິຫານທຳແບບນີ້ ທ່ານຮູບນັ້ນເປັນຜູ້ລຸດພົ້ນແລ້ວແບບນີ້" ພິກຂຸນັ້ນເມື່ອຣະນຶກເຖິງສັດທາ ສີນ ສຸຕະ ຈາຄະ ແລະ ປັນຍາຂອງທ່ານຮູບນັ້ນ ກໍຈະນ້ອມຈິດໄປເພື່ອສັດທາເປັນຕົ້ນນັ້ນ ການຢູ່ຢ່າງຜາສຸກຍ່ອມມີແກ່ພິກຂຸ ດ້ວຍປະການດັ່ງນີ້ແລ

ອະນຸຣຸດທະ ພິກຂຸໃນທຳວິໄນນີ້ໄດ້ຟັງວ່າ "ພິກຂຸຊື່ນີ້ມໍຣະນະພາບແລ້ວ ໄດ້ຮັບພະຍາກອນຈາກພຣະຜູ້ມີພຣະພາກເຈົ້າວ່າ "ທ່ານຮູບນັ້ນເປັນໂສດາບັນ ຍ້ອນສັງໂຍດ ໓ ປະການສິ້ນໄປ ເປັນຜູ້ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສັມໂພທິໃນມື້ຂ້າງໜ້າ" ພິກຂຸນັ້ນໄດ້ເຫັນເອງຫຼືໄດ້ຟັງມາວ່າ "ທ່ານຮູບນັ້ນເປັນຜູ້ມີສີນແບບນີ້ ຯລຯ ເປັນຜູ້ມີທຳແບບນີ້ ຯລຯ ເປັນຜູ້ມີປັນຍາແບບນີ້ ຯລຯ ເປັນຜູ້ມີວິຫານທຳແບບນີ້ ທ່ານຮູບນັ້ນເປັນຜູ້ລຸດພົ້ນແລ້ວແບບນີ້" ພິກຂຸນັ້ນເມື່ອຣະນຶກເຖິງສັດທາ ສີນ ສຸຕະ ຈາຄະ ແລະປັນຍາຂອງທ່ານຮູບນັ້ນ ກໍຈະນ້ອມຈິດໄປ

ເພື່ອສັດທາເປັນຕົ້ນນັ້ນ ການຢູ່ຢ່າງຜາສຸກຍ່ອມມີແກ່ພິກຂຸ ດ້ວຍປະການ ສະນີ້ແລ

## ການຢູ່ຢ່າງຜາສຸກຂອງພິກຂຸນີ

[໑໗໐] ອະນຸຣຸດທະ ພິກຂຸນີໃນທຳວິໄນນີ້ໄດ້ຟັງວ່າ "ພິກຂຸນີຊື່ນີ້ມໍຣະນະພາບແລ້ວ ໄດ້ຮັບພະຍາກອນຈາກພຣະຜູ້ມີພຣະພາກເຈົ້າວ່າ "ນາງນັ້ນດຳລົງຢູ່ໃນອະຣະຫັດຕະຜົນ" ພິກຂຸນີນັ້ນໄດ້ເຫັນເອງຫຼືໄດ້ຟັງມາວ່າ "ນາງນັ້ນເປັນຜູ້ມີສີນແບບນີ້ ນາງນັ້ນເປັນຜູ້ມີທຳແບບນີ້ ນາງນັ້ນເປັນຜູ້ມີປັນຍາແບບນີ້ ນາງນັ້ນເປັນຜູ້ມີວິຫານທຳແບບນີ້ ນາງນັ້ນເປັນຜູ້ລຸດພົ້ນແລ້ວແບບນີ້" ພິກຂຸນີນັ້ນເມື່ອຣະນຶກເຖິງສັດທາ ສີນ ສຸຕະ ຈາຄະ ແລະ ປັນຍາຂອງນາງນັ້ນ ກໍຈະນ້ອມຈິດໄປເພື່ອສັດທາເປັນຕົ້ນນັ້ນ ການຢູ່ຢ່າງຜາສຸກຍ່ອມມີແກ່ພິກຂຸນີ ດ້ວຍປະການດັ່ງນີ້ແລ

ພິກຂຸນີໃນທຳວິໄນນີ້ໄດ້ຟັງວ່າ "ພິກຂຸນີຊື່ນີ້ມໍຣະນະພາບແລ້ວ ໄດ້ຮັບພະຍາກອນຈາກພຣະຜູ້ມີພຣະພາກເຈົ້າວ່າ "ນາງນັ້ນເປັນໂອປະປາຕິກະ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ" ພິກຂຸນີນັ້ນໄດ້ເຫັນເອງຫຼືໄດ້ຟັງມາວ່າ "ນາງນັ້ນເປັນຜູ້ມີສີນແບບນີ້ ນາງນັ້ນເປັນຜູ້ມີທຳແບບນີ້ ນາງນັ້ນເປັນຜູ້ມີປັນຍາແບບນີ້ ນາງນັ້ນເປັນຜູ້ມີວິຫານທຳແບບນີ້ ນາງນັ້ນເປັນຜູ້ລຸດພົ້ນແລ້ວແບບນີ້" ພິກຂຸນີນັ້ນເມື່ອຣະນຶກເຖິງສັດທາ ສີນ ສຸຕະ ຈາຄະ ແລະປັນຍາຂອງນາງນັ້ນ ກໍຈະນ້ອມຈິດໄປເພື່ອສັດທາເປັນຕົ້ນນັ້ນ ການຢູ່ຢ່າງຜາສຸກຍ່ອມມີແກ່ພິກຂຸນີ ດ້ວຍປະການດັ່ງນີ້ແລ

ພິກຂຸນີໃນທຳວິໄນນີ້ໄດ້ຟັງວ່າ "ພິກຂຸນີຊື່ນີ້ມໍຣະນະພາບແລ້ວ ໄດ້ຮັບພະຍາກອນຈາກພຣະຜູ້ມີພຣະພາກເຈົ້າວ່າ "ນາງນັ້ນເປັນສະກະທາຄາມີ ຍ້ອນສັງໂຍດ ໓ ປະການສິ້ນໄປ ແລະຍ້ອນຣາຄະ ໂທສະ ໂມຫະ ເບົາບາງ ຈັກກັບມາສູ່ໂລກນີ້ອີກເທື່ອດຽວແລ້ວຈະເຮັດທີ່ສຸດແຫ່ງທຸກໄດ້" ພິກຂຸນີນັ້ນໄດ້ເຫັນເອງຫຼືໄດ້ຟັງມາວ່າ "ນາງນັ້ນເປັນຜູ້ມີສີນແບບນີ້ ຯລຯ ເປັນຜູ້ມີທຳແບບນີ້ ຯລຯ ເປັນຜູ້ມີປັນຍາແບບນີ້ ຯລຯ ເປັນຜູ້ມີວິຫານທຳແບບນີ້ ນາງ ນັ້ນເປັນຜູ້ລຸດພົ້ນແລ້ວແບບນີ້' ພິກຂຸນີນັ້ນເມື່ອຣະນຶກເຖິງສັດທາ ສີນ ສຸຕະ ຈາຄະ ແລະປັນຍາຂອງນາງນັ້ນ ກໍຈະນ້ອມຈິດໄປເພື່ອສັດທາເປັນຕົ້ນນັ້ນ ການຢູ່ຢ່າງຜາສຸກຍ່ອມມີແກ່ພິກຂຸນີ ດ້ວຍປະການດັ່ງນີ້ແລ

ອະນຸຣຸດທະ ພິກຂຸນີໃນທຳວິໄນນີ້ໄດ້ຟັງວ່າ "ພິກຂຸນີຊື່ນີ້ມໍຣະນະພາບແລ້ວໄດ້ຮັບພະຍາກອນຈາກພຣະຜູ້ມີພຣະພາກເຈົ້າວ່າ "ນາງນັ້ນເປັນໂສດາບັນ ຍ້ອນສັງໂຍດ ໓ ປະການສິ້ນໄປເປັນຜູ້ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສັມໂພທິໃນມື້ຂ້າງໜ້າ" ພິກຂຸນີນັ້ນໄດ້ເຫັນເອງຫຼືໄດ້ຟັງມາວ່າ "ນາງນັ້ນເປັນຜູ້ມີສີນແບບນີ້ ຯລຯ ເປັນຜູ້ມີທຳ ແບບນີ້ ຯລຯ ເປັນຜູ້ມີປັນຍາແບບນີ້ ຯລຯ ເປັນຜູ້ມີວິຫານທຳແບບນີ້ ນາງນັ້ນເປັນຜູ້ລຸດພົ້ນແລ້ວແບບນີ້" ພິກຂຸນີນັ້ນ

ເມື່ອຣະນຶກເຖິງສັດທາ ສີນ ສຸຕະ ຈາຄະ ແລະປັນຍາ ຂອງນາງນັ້ນ ກໍຈະນ້ອມຈິດໄປເພື່ອສັດທາເປັນຕົ້ນນັ້ນ ການຢູ່ຢ່າງຜາສຸກຍ່ອມມີແກ່ ພິກຂຸນີ ດ້ວຍປະການດັ່ງນີ້ແລ

## ການຢູ່ຢ່າງຜາສຸກຂອງອຸປາສົກ

[໑໗໑] ອະນຸຣຸດທະ ອຸປາສົກໃນສາດສະໜານີ້ໄດ້ຟັງວ່າ "ອຸປາສົກຊື່ນີ້ຕາຍແລ້ວ ໄດ້ຮັບພະຍາກອນຈາກພຣະຜູ້ມີພຣະພາກເຈົ້າວ່າ "ທ່ານຜູ້ນັ້ນເປັນໂອປະປາຕິກະ ຍ້ອນໂອຣໍາພາຄິຍະສັງໂຍດ ໕ ປະການສິ້ນໄປ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ" ອຸປາສົກນັ້ນໄດ້ເຫັນເອງຫຼືໄດ້ຟັງມາວ່າ "ທ່ານຜູ້ນັ້ນເປັນຜູ້ມີສີນແບບນີ້ ທ່ານຜູ້ນັ້ນເປັນຜູ້ມີທໍາແບບນີ້ ທ່ານຜູ້ນັ້ນເປັນຜູ້ມີປັນຍາແບບນີ້ ທ່ານຜູ້ນັ້ນເປັນຜູ້ມີວິຫານທໍາແບບນີ້ ທ່ານຜູ້ນັ້ນເປັນຜູ້ລຸດພົ້ນແລ້ວແບບນີ້" ອຸປາສົກນັ້ນເມື່ອຣະນຶກເຖິງສັດທາ ສີນ ສຸຕະ ຈາຄະ ແລະ ປັນຍາຂອງທ່ານຜູ້ນັ້ນ ກໍຈະນ້ອມຈິດໄປເພື່ອສັດທາເປັນຕົ້ນນັ້ນ ການຢູ່ຢ່າງຜາສຸກຍ່ອມມີແກ່ອຸປາສົກ ດ້ວຍປະການດັ່ງນີ້ແລ

ອຸປາສົກໃນສາດສະໜານີ້ໄດ້ຟັງວ່າ "ອຸປາສົກຊື່ນີ້ຕາຍແລ້ວ ໄດ້ຮັບພະຍາກອນຈາກພຣະຜູ້ມີພຣະພາກເຈົ້າວ່າ "ທ່ານຜູ້ນັ້ນເປັນສະກະທາຄາມີ ຍ້ອນສັງໂຍດ ໓ ປະການສິ້ນໄປແລະຍ້ອນ ຣາຄະ ໂທສະ ໂມຫະ ເບົາບາງ ຈັກກັບມາສູ່ໂລກນີ້ອີກເທື່ອດຽວແລ້ວຈະເຮັດທີ່ສຸດແຫ່ງທຸກໄດ້" ອຸປາສົກນັ້ນໄດ້ເຫັນເອງຫຼືໄດ້ຟັງມາວ່າ "ທ່ານຜູ້ນັ້ນເປັນຜູ້ມີສີນແບບນີ້ ฯລฯ ເປັນຜູ້ມີທໍາ ແບບນີ້ ฯລฯ ເປັນຜູ້ມີປັນຍາແບບນີ້ ฯລฯ ເປັນຜູ້ມີວິຫານທໍາແບບນີ້ ທ່ານຜູ້ນັ້ນເປັນຜູ້ລຸດພົ້ນແລ້ວແບບນີ້" ອຸປາສົກນັ້ນເມື່ອຣະນຶກເຖິງສັດທາ ສີນ ສຸຕະ ຈາຄະ ແລະ ປັນຍາຂອງທ່ານຜູ້ນັ້ນ ກໍຈະນ້ອມຈິດໄປເພື່ອສັດທາເປັນຕົ້ນນັ້ນ ການຢູ່ຢ່າງຜາສຸກຍ່ອມມີແກ່ອຸປາສົກ ດ້ວຍປະການດັ່ງນີ້ແລ

ອະນຸຣຸດທະ ອຸປາສົກໃນສາດສະໜານີ້ໄດ້ຟັງວ່າ "ອຸປາສົກຊື່ນີ້ຕາຍແລ້ວ ໄດ້ຮັບພະຍາກອນຈາກພຣະຜູ້ມີພຣະພາກເຈົ້າວ່າ "ທ່ານຜູ້ນັ້ນເປັນໂສດາບັນ ຍ້ອນສັງໂຍດ ໓ ປະການສິ້ນໄປ ເປັນຜູ້ບໍ່ມີທາງຕົກຕໍ່າ ມີຄວາມແນ່ນອນທີ່ຈະສໍາເລັດສັມໂພທິໃນມື້ຂ້າງໜ້າ" ອຸປາສົກນັ້ນໄດ້ເຫັນເອງຫຼືໄດ້ຟັງມາວ່າ "ທ່ານຜູ້ນັ້ນເປັນຜູ້ມີສີນແບບນີ້ ฯລฯ ເປັນຜູ້ມີທໍາແບບນີ້ ฯລฯ ເປັນຜູ້ມີປັນຍາແບບນີ້ ฯລฯ ເປັນຜູ້ມີວິຫານທໍາແບບນີ້ ທ່ານຜູ້ນັ້ນເປັນຜູ້ລຸດພົ້ນແລ້ວແບບນີ້" ອຸປາສົກນັ້ນເມື່ອຣະນຶກເຖິງສັດທາ ສີນ ສຸຕະ ຈາຄະ ແລະປັນຍາຂອງທ່ານຜູ້ນັ້ນ ກໍຈະ ນ້ອມຈິດໄປເພື່ອສັດທາເປັນຕົ້ນນັ້ນ ການຢູ່ຢ່າງຜາສຸກຍ່ອມມີແກ່ອຸປາສົກ ດ້ວຍປະການ ສະນີ້ແລ

## ການຢູ່ຢ່າງຜາສຸກຂອງອຸປາສິກາ

[໑໗໘] ອະນຸຣຸດທະ ອຸປາສິກາໃນສາດສະໜານີ້ໄດ້ຟັງວ່າ "ອຸປາສິກາຊື່ນີ້ຕາຍແລ້ວ ໄດ້

ຮັບພະຍາກອນຈາກພຣະຜູ້ມີພຣະພາກເຈົ້າວ່າ "ນາງນັ້ນເປັນໂອປະປາຕິກະ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ" ອຸປາສິການັ້ນໄດ້ເຫັນເອງຫຼືໄດ້ຟັງມາວ່າ "ນາງນັ້ນເປັນຜູ້ມີສີນແນວນີ້ ໆລໆ ເປັນຜູ້ມີທຳແນວນີ້ ໆລໆ ເປັນຜູ້ມີປັນຍາແນວນີ້ ໆລໆ ເປັນຜູ້ມີວິຫານທຳແນວນີ້ ນາງນັ້ນເປັນຜູ້ລຸດພົ້ນແລ້ວແນວນີ້" ອຸປາສິການັ້ນເມື່ອຣະນຶກເຖິງສັດທາ ສີນ ສຸຕະ ຈາຄະ ແລະ ປັນຍາຂອງນາງນັ້ນ ກໍຈະນ້ອມຈິດໄປເພື່ອສັດທາເປັນຕົ້ນນັ້ນ ການຢູ່ຢ່າງຜາສຸກຍ່ອມມີແກ່ອຸປາສິກາ ດ້ວຍປະການດັ່ງນີ້ແລ

ອຸປາສິກາໃນສາດສະໜານີ້ໄດ້ຟັງວ່າ "ອຸປາສິກາຊື່ນີ້ຕາຍແລ້ວ ໄດ້ຮັບພະຍາກອນຈາກພຣະຜູ້ມີພຣະພາກວ່າ "ນາງນັ້ນ ເປັນສະກະທາຄາມີ ຍ້ອນສັງໂຍດ ໓ ປະການສິ້ນໄປ ແລະຍ້ອນຣາຄະ ໂທສະ ໂມຫະເບົາບາງ ຈັກກັບມາສູ່ໂລກນີ້ອີກເທື່ອດຽວແລ້ວຈະເຮັດທີ່ສຸດແຫ່ງທຸກໄດ້" ອຸປາສິການັ້ນໄດ້ເຫັນເອງ ຫຼື ໄດ້ຟັງມາວ່າ "ນາງນັ້ນເປັນຜູ້ມີສີນແນວນີ້ ໆລໆ ເປັນຜູ້ມີທຳແນວນີ້ ໆລໆ ເປັນຜູ້ມີປັນຍາແນວນີ້ ໆລໆ ເປັນຜູ້ມີວິຫານທຳແນວນີ້ ນາງນັ້ນເປັນຜູ້ລຸດພົ້ນແລ້ວແນວນີ້" ອຸປາສິການັ້ນເມື່ອຣະນຶກເຖິງສັດທາ ສີນ ສຸຕະ ຈາຄະ ແລະປັນຍາຂອງນາງນັ້ນກໍຈະນ້ອມ ຈິດໄປເພື່ອສັດທາເປັນຕົ້ນນັ້ນ ການຢູ່ຢ່າງຜາສຸກຍ່ອມມີແກ່ອຸປາສິກາ ດ້ວຍປະການດັ່ງນີ້ແລ

ອຸປາສິກາໃນສາດສະໜານີ້ໄດ້ຟັງວ່າ "ອຸປາສິກາຊື່ນີ້ຕາຍແລ້ວ ໄດ້ຮັບພະຍາກອນຈາກພຣະຜູ້ມີພຣະພາກວ່າ "ນາງນັ້ນເປັນໂສດາບັນ ຍ້ອນສັງໂຍດ ໓ ປະການສິ້ນໄປ ເປັນຜູ້ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສັມໂພທິໃນມື້ຂ້າງໜ້າ" ອຸປາສິການັ້ນໄດ້ເຫັນເອງຫຼືໄດ້ຟັງມາວ່າ "ນາງນັ້ນເປັນຜູ້ມີສີນແນວນີ້ ນາງນັ້ນເປັນຜູ້ມີທຳແນວນີ້ ນາງນັ້ນເປັນຜູ້ມີປັນຍາແນວນີ້ ນາງນັ້ນເປັນຜູ້ມີວິຫານທຳແນວນີ້ ນາງນັ້ນເປັນຜູ້ລຸດພົ້ນແລ້ວແນວນີ້" ອຸປາສິການັ້ນເມື່ອຣະນຶກເຖິງສັດທາ ສີນ ສຸຕະ ຈາຄະ ແລະປັນຍາຂອງນາງນັ້ນ ກໍຈະນ້ອມຈິດໄປເພື່ອສັດທາເປັນຕົ້ນນັ້ນ ການຢູ່ຢ່າງຜາສຸກຍ່ອມມີແກ່ອຸປາສິກາ ດ້ວຍປະການດັ່ງນີ້ແລ

ຕາມທີ່ກ່າວມານີ້ແລ ຕະຖາຄົດພະຍາກອນສາວົກທັງຫລາຍຜູ້ລ່ວງລັບໄປແລ້ວໃນພົບທີ່ເກີດທັງຫລາຍວ່າ "ສາວົກຊື່ນັ້ນເກີດໃນພົບນັ້ນ ສາວົກຊື່ນັ້ນເກີດໃນພົບນັ້ນ" ເພື່ອໃຫ້ຄົນເກີດຄວາມພິສວງກໍເປັນໄປບໍ່ໄດ້ ເພື່ອເກ້ຍກ່ອມຄົນກໍເປັນໄປບໍ່ໄດ້ ເພື່ອອານິສົງຄືລາບສັກກາຣະແລະຄວາມສັນເສີນກໍເປັນໄປບໍ່ໄດ້ ຫຼື ດ້ວຍຄວາມປະສົງວ່າ "ຄົນຈົ່ງຮູ້ຈັກເຮົາດ້ວຍເຫດນີ້" ກໍເປັນໄປບໍ່ໄດ້

ອະນຸຣຸດທະ ກຸນລະບຸດຜູ້ມີສັດທາ ມີຄວາມຍິນດີຫຼາຍ ມີຄວາມປາໂມດຫຼາຍ ມີຢູ່ກຸນລະບຸດເຫຼົ່ານັ້ນໄດ້ຟັງຄຳພະຍາກອນນັ້ນແລ້ວ ຈະນ້ອມຈິດໄປເພື່ອສັດທາເປັນຕົ້ນນັ້ນ ຂໍ້ນັ້ນ ຍ່ອມເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອສຸກແກ່ກຸນລະບຸດເຫຼົ່ານັ້ນສິ້ນການລະນານ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະອະນຸຣຸດທະມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ນະລະກະປານະສູດທີ ໗ ຈົບ**

# ໘. ໂຄລິດສານິສູດ

## ວ່າດ້ວຍພິກຂຸຊື່ໂຄລິດສານິ

## ຄຸນນະທຳຂອງພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ

[໑໗໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ພິກຂຸຊື່ໂຄລິດສານິ ເປັນຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ມີມາຣະຍາດຊາມນັ່ງຢູ່ໃນທ່າມກາງສົງ ດ້ວຍວຽກງານບາງຢ່າງ ໃນບ່ອນນັ້ນ ທ່ານພຣະສາຣີບຸດ ຜາຣົບພິກຂຸຊື່ໂຄລິດສານິ ຈຶ່ງຮຽກພິກຂຸທັງຫລາຍມາກ່າວວ່າ

"ທ່ານຜູ້ມີອາຍຸທັງຫລາຍ ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ຄວນເປັນຜູ້ມີຄວາມເຄົາລົບຢຳເກງໃນເພື່ອນພົມມະຈາຣີທັງຫລາຍ ຖ້າພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງຢູ່ໃນສົງ ເປັນຜູ້ບໍ່ເຄົາລົບຢຳເກງໃນເພື່ອນພົມມະຈາຣີ ທັງຫລາຍແລ້ວ ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ວ່າ "ຈະມີປະໂຫຍດອັນໃດກັບການສະໝັກໃຈຢູ່ປ່າແຕ່ຜູ້ດຽວ ສຳລັບທ່ານຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດນີ້ ແຕ່ບໍ່ມີຄວາມເຄົາລົບຢຳເກງໃນ ເພື່ອນພົມມະຈາຣີທັງຫລາຍ" ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ ຍ້ອນແນວນັ້ນ ພິກຂຸຜູ້ຖືການ ຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງຢູ່ໃນສົງ ຄວນເປັນຜູ້ມີຄວາມເຄົາລົບຢຳເກງໃນເພື່ອນພົມມະຈາຣີທັງຫລາຍ (໑)

ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ຄວນເຂົ້າໃຈລຳດັບແຫ່ງອາສະນະວ່າ "ເຮົາຈັກບໍ່ນັ່ງບຽດພິກຂຸຜູ້ເປັນເຖຣະ ແລະ ຈັກບໍ່ກັນອາສະນະພິກຂຸຜູ້ເປັນນະວະກະ" ຖ້າພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ບໍ່ເຂົ້າໃຈລຳດັບແຫ່ງອາສະນະ ຈະມີຜູ້ຕິຕຽນພິກຂຸຮູບນັ້ນໄດ້ວ່າ "ຈະມີປະໂຫຍດອັນໃດກັບການສະໝັກໃຈຢູ່ປ່າແຕ່ຜູ້ດຽວ ສຳລັບທ່ານຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດນີ້ ແຕ່ບໍ່ເຂົ້າໃຈລຳດັບແຫ່ງອາສະນະ" ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ ຍ້ອນແນວນັ້ນ ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ຄວນເຂົ້າໃຈລຳດັບແຫ່ງອາສະນະ (໒)

ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ຄວນຮູ້ອະພິສະມາຈາຣິກາທຳ ຖ້າພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ບໍ່ຮູ້ອະພິສະມາຈາຣິກາທຳ ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ວ່າ "ຈະມີປະໂຫຍດອັນໃດກັບການສະໝັກໃຈຢູ່ປ່າແຕ່ຜູ້ດຽວ ສຳລັບທ່ານຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດນີ້ ແຕ່ບໍ່ຮູ້ອະພິສະມາຈາຣິກາທຳ" ຈະມີຜູ້ຕິຕຽນພິກຂຸ ນັ້ນໄດ້ ຍ້ອນແນວນັ້ນ ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ຄວນຮູ້ ອະພິສະມາຈາຣິກາທຳ (໓)

ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ບໍ່ຄວນເຂົ້າບ້ານເຊົ້າຫຼາຍ ບໍ່ຄວນກັບມາສາຍຫຼາຍ ຖ້າພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ເຂົ້າເຮືອນເຊົ້າໂພດ ກັບມາສາຍນັກ ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ວ່າ "ຈະມີປະໂຫຍດອັນໃດກັບການສະໝັກໃຈຢູ່ປ່າແຕ່ຜູ້ດຽວ ສຳລັບທ່ານຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດນີ້ ທີ່ເຂົ້າເຮືອນເຊົ້າໂພດ ກັບມາສາຍນັກ" ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ ຍ້ອນແນວນັ້ນ ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ບໍ່ຄວນເຂົ້າບ້ານເຊົ້າຫຼາຍ ບໍ່ຄວນກັບມາສາຍຫຼາຍ (໔)

ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ບໍ່ຄວນທ່ຽວໄປໃນຕະກູນທັງຫລາຍ ໃນເວລາກ່ອນສັນພັດຕາຫານ ໃນເວລາຫລັງສັນພັດຕາຫານ ຖ້າພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ທ່ຽວໄປໃນຕະກູນທັງຫລາຍໃນເວລາກ່ອນສັນພັດຕາຫານ ໃນເວລາຫລັງສັນພັດຕາຫານ ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ວ່າ "ທ່ານຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຜູ້ສະໝັກໃຈຢູ່ປ່າແຕ່ຜູ້ດຽວນີ້ ໄດ້ທຳການທ່ຽວໄປໃນເວລາວິການໄວ້ຫຼາຍແນ່ ອັນໜຶ່ງ ເພື່ອນພົມມະຈາຣີກໍຈະກ່າວທັກທ້ວງທ່ານຜູ້ໄປໃນສົງໄດ້" ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ ຍ້ອນແນວນັ້ນ ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ຈຶ່ງບໍ່ຄວນທ່ຽວໄປໃນຕະກູນທັງຫລາຍ ໃນເວລາກ່ອນສັນພັດຕາຫານ ໃນເວລາຫລັງສັນພັດຕາຫານ (໕)

ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ບໍ່ຄວນເປັນຜູ້ຄະນອງກາຍ ຄະນອງວາຈາ ຖ້າພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ເປັນຜູ້ຄະນອງກາຍ ຄະນອງວາຈາ ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ວ່າ "ທ່ານຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຜູ້ສະໝັກໃຈຢູ່ປ່າແຕ່ຜູ້ດຽວນີ້ ໄດ້ທຳການຄະນອງກາຍ ຄະນອງວາຈາໄວ້ຫຼາຍແນ່ ອັນໜຶ່ງ ເພື່ອນພົມມະຈາຣີກໍຈະກ່າວທັກທ້ວງທ່ານຜູ້ໄປກັບສົງໄດ້" ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ ຍ້ອນແນວນັ້ນ ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ຈຶ່ງບໍ່ຄວນ ຄະນອງກາຍ ຄະນອງວາຈາ (໖)

ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ບໍ່ຄວນເປັນຜູ້ມີປາກກ້າ ບໍ່ຄວນເປັນຜູ້ມີວາຈາຈັດຈ້ານ ຖ້າພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ເປັນຜູ້ມີປາກກ້າ ເປັນຜູ້ມີວາຈາຈັດຈ້ານ ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ວ່າ "ຈະມີປະໂຫຍດ ອັນໃດ

ກັບການສະໝັກໃຈຢູ່ປ່າແຕ່ຜູ້ດຽວ ສຳລັບທ່ານຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດນີ້ແຕ່ເປັນ ຜູ້ມີປາກກ້າ ເປັນຜູ້ມີວາຈາຈັດຈ້ານ" ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ ຍ້ອນແນວນັ້ນ ພິກຂຸຜູ້ ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ຈຶ່ງບໍ່ຄວນເປັນຜູ້ມີປາກກ້າ ເປັນຜູ້ມີວາຈາຈັດຈ້ານ (໗)

ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ຄວນເປັນຜູ້ວ່າງ່າຍເປັນກັນລະຍານະມິດ ຖ້າພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ເປັນຜູ້ວ່າຍາກ ເປັນບາບມິດ ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ວ່າ "ຈະມີປະໂຫຍດອັນໃດກັບການສະໝັກໃຈຢູ່ປ່າແຕ່ຜູ້ດຽວ ສຳລັບທ່ານຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດນີ້ ແຕ່ເປັນຜູ້ວ່າຍາກ ເປັນ ບາບມິດ" ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ ຍ້ອນແນວນັ້ນ ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເມື່ອໄປຫາສົງ ຢູ່ໃນສົງ ຈຶ່ງຄວນເປັນຜູ້ວ່າງ່າຍ ເປັນກັນລະຍານະມິດ (໘)

ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຄວນເປັນຜູ້ຄຸ້ມຄອງທະວາຣະໃນອິນຊີທັງຫລາຍ ຖ້າພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເປັນຜູ້ບໍ່ຄຸ້ມຄອງທະວາຣະໃນອິນຊີທັງຫລາຍ ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ວ່າ "ຈະມີປະໂຫຍດອັນໃດກັບການສະໝັກໃຈຢູ່ປ່າແຕ່ຜູ້ດຽວ ສຳລັບທ່ານຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດນີ້ ແຕ່ບໍ່ຄຸ້ມຄອງທະວາຣະໃນອິນຊີທັງຫລາຍ" ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ ຍ້ອນແນວນັ້ນ ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຈຶ່ງຄວນເປັນຜູ້ຄຸ້ມຄອງທະວາຣະໃນອິນຊີທັງຫລາຍ (໙)

ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຄວນເປັນຜູ້ຮູ້ປະມານໃນການບໍຣິໂພກອາຫານ ຖ້າພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ເປັນຜູ້ບໍ່ຮູ້ປະມານໃນການບໍຣິໂພກອາຫານ ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ວ່າ "ຈະມີປະໂຫຍດອັນໃດກັບການສະໝັກໃຈຢູ່ປ່າແຕ່ຜູ້ດຽວ ສຳລັບທ່ານຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດນີ້ ແຕ່ເປັນຜູ້ບໍ່ຮູ້ປະມານໃນການບໍຣິໂພກອາຫານ" ຈະມີຜູ້ ຕິຕຽນພິກຂຸນັ້ນໄດ້ ຍ້ອນແນວນັ້ນ ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຈຶ່ງຄວນເປັນຜູ້ຮູ້ປະມານໃນການບໍຣິໂພກອາຫານ (໑໐)

ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຄວນເປັນຜູ້ປະກອບຄວາມພຽນເຄື່ອງຕື່ນຢ່າງຕໍ່ເນື່ອງ ຖ້າພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ບໍ່ເປັນຜູ້ປະກອບຄວາມພຽນເຄື່ອງຕື່ນຢ່າງຕໍ່ເນື່ອງ ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ວ່າ "ຈະມີປະໂຫຍດອັນໃດກັບການສະໝັກໃຈຢູ່ປ່າແຕ່ຜູ້ດຽວ ສຳລັບທ່ານຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດນີ້ ແຕ່ບໍ່ປະກອບຄວາມພຽນເຄື່ອງຕື່ນຢ່າງຕໍ່ເນື່ອງ" ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ ຍ້ອນແນວນັ້ນ ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຈຶ່ງຄວນເປັນຜູ້ປະກອບຄວາມພຽນເຄື່ອງຕື່ນຢ່າງຕໍ່ເນື່ອງ (໑໑)

ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຄວນເປັນຜູ້ຜາຣົບຄວາມພຽນ ຖ້າພິກຂຸຜູ້ຖືການຢູ່

ປ່າເປັນຂໍ້ວັດປະຕິບັດເປັນຜູ້ຂີ້ຄ້ານ ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ວ່າ "ຈະມີປະໂຫຍດອັນໃດ ກັບການສະໝັກໃຈຢູ່ປ່າແຕ່ຜູ້ດຽວ ສຳລັບທ່ານຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດນີ້ ແຕ່ເປັນຜູ້ຂີ້ຄ້ານ" ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ ຍ້ອນແນວນັ້ນ ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຈຶ່ງຄວນເປັນຜູ້ຜາຣົບຄວາມພຽນ (໑໔)

ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຄວນເປັນຜູ້ມີສະຕິຕັ້ງໝັ້ນ ຖ້າພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດເປັນຜູ້ມີສະຕິຟັ່ນເຟືອນ ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ວ່າ "ຈະມີປະໂຫຍດອັນໃດກັບການ ສະໝັກໃຈຢູ່ປ່າແຕ່ຜູ້ດຽວ ສຳລັບທ່ານຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດນີ້ ແຕ່ເປັນຜູ້ມີສະຕິ ຟັ່ນເຟືອນ" ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ ຍ້ອນແນວນັ້ນ ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດຈຶ່ງຄວນເປັນຜູ້ມີສະຕິຕັ້ງໝັ້ນ (໑໓)

ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຄວນເປັນຜູ້ມີຈິດຕັ້ງໝັ້ນ ຖ້າພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດເປັນຜູ້ມີຈິດບໍ່ຕັ້ງໝັ້ນ ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ວ່າ "ຈະມີປະໂຫຍດອັນໃດກັບການສະໝັກໃຈຢູ່ປ່າແຕ່ຜູ້ດຽວ ສຳລັບທ່ານຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດນີ້ ແຕ່ເປັນຜູ້ມີຈິດ ບໍ່ຕັ້ງໝັ້ນ" ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ ຍ້ອນແນວນັ້ນ ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຈຶ່ງຄວນເປັນຜູ້ມີຈິດຕັ້ງໝັ້ນ (໑໔)

ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຄວນເປັນຜູ້ມີປັນຍາ ຖ້າພິກຂຸຜູ້ຖືການຢູ່ປ່າ ເປັນຂໍ້ວັດປະຕິບັດເປັນຜູ້ມີປັນຍາຊາມ ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ວ່າ "ຈະມີປະໂຫຍດອັນໃດກັບການສະໝັກໃຈຢູ່ປ່າແຕ່ຜູ້ດຽວ ສຳລັບທ່ານຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດນີ້ ແຕ່ເປັນຜູ້ມີປັນຍາຊາມ" ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ ຍ້ອນແນວນັ້ນ ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຈຶ່ງຄວນເປັນຜູ້ມີປັນຍາ (໑໕)

ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຄວນທຳຄວາມພຽນໃນອະພິທຳ ແລະໃນອະພິວິໄນຍ້ອນເມື່ອມີຜູ້ຖາມບັນຫາໃນອະພິທຳ ແລະໃນອະພິວິໄນກັບພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຖ້າພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດຖືກຖາມບັນຫາໃນອະພິທຳ ແລະໃນອະພິວິໄນແລ້ວຕອບບໍ່ໄດ້ ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ວ່າ "ຈະມີປະໂຫຍດອັນໃດກັບການສະໝັກໃຈຢູ່ປ່າແຕ່ຜູ້ດຽວ ສຳລັບທ່ານຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດນີ້ ແຕ່ຖືກຖາມບັນຫາໃນອະພິທຳ ແລະໃນອະພິວິໄນແລ້ວຕອບບໍ່ໄດ້" ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ ຍ້ອນແນວນັ້ນ ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຈຶ່ງຄວນທຳຄວາມພຽນໃນອະພິທຳແລະໃນອະພິວິໄນ (໑໖)

ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຄວນທຳຄວາມພຽນໃນສັນຕະວິໂມກເຊິ່ງບໍ່ມີຮູບຍ້ອນລ່ວງຮູບຊານ ຍ້ອນເມື່ອມີຄົນຖາມບັນຫາໃນສັນຕະວິໂມກ ເຊິ່ງບໍ່ມີຮູບຍ້ອນລ່ວງຮູບຊານກັບພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຖ້າພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດຖືກຖາມ

ບັນຫາໃນສັນຕະວິໂມກເຊິ່ງບໍ່ມີຮູບຍ້ອນລ່ວງຮູບຊານແລ້ວ ຕອບບໍ່ໄດ້ ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ວ່າ "ຈະມີປະໂຫຍດອັນໃດກັບການສະໝັກໃຈຢູ່ປ່າແຕ່ຜູ້ດຽວ ສຳລັບທ່ານຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດນີ້ ແຕ່ຖືກຖາມບັນຫາໃນສັນຕະວິໂມກເຊິ່ງບໍ່ມີຮູບຍ້ອນລ່ວງຮູບຊານແລ້ວ ຕອບບໍ່ໄດ້" ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ ຍ້ອນແນວນັ້ນ ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຈຶ່ງຄວນທຳຄວາມພຽນໃນສັນຕະວິໂມກເຊິ່ງບໍ່ມີຮູບຍ້ອນລ່ວງຮູບຊານ (໑໗)

ທ່ານຜູ້ມີອາຍຸທັງຫລາຍ ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຄວນທຳຄວາມພຽນໃນອຸດຕະຣິມະນຸດສະທຳ໑ ຍ້ອນເມື່ອມີຄົນຖາມບັນຫາໃນອຸດຕະຣິມະນຸດສະທຳກັບພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຖ້າພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດຖືກຖາມບັນຫາໃນອຸດຕະຣິມະນຸດສະທຳແລ້ວ ຕອບບໍ່ໄດ້ ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ວ່າ "ຈະມີປະໂຫຍດອັນໃດກັບການສະໝັກໃຈຢູ່ປ່າແຕ່ຜູ້ດຽວ ສຳລັບທ່ານຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດນີ້ ແຕ່ບໍ່ຮູ້ເນື້ອຄວາມແຫ່ງຄຸນວິເສດທີ່ ກຸນລະບຸດຜູ້ອອກບວຊແລ້ວຕ້ອງການ" ຈະມີຜູ້ຕິຕຽນພິກຂຸນັ້ນໄດ້ ຍ້ອນແນວນັ້ນ ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຈຶ່ງຄວນທຳຄວາມພຽນໃນອຸດຕະຣິມະນຸດສະທຳ (໑໘)"

ເມື່ອທ່ານພຣະສາຣີບຸດກ່າວແນວນີ້ແລ້ວ ທ່ານພຣະມະຫາໂມກຄັນລານະໄດ້ຖາມທ່ານພຣະສາຣີບຸດວ່າ

"ທ່ານສາຣີບຸດ ທຳເຫລົ່ານີ້ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດທໍ່ນັ້ນ ຫຼື ທີ່ຄວນສະມາທານປະພຶດ ຫຼື ທຳເຫລົ່ານີ້ແມ່ນພິກຂຸຜູ້ຢູ່ໃນອາຣາມໃກ້ເຮືອນກໍຄວນສະມາທານປະພຶດດ້ວຍ"

ທ່ານພຣະສາຣີບຸດຕອບວ່າ "ທ່ານໂມກຄັນລານະ ທຳເຫລົ່ານີ້ພິກຂຸຜູ້ຖືການຢູ່ປ່າເປັນຂໍ້ວັດປະຕິບັດຄວນສະມາທານປະພຶດ ບໍ່ຈຳເປັນຕ້ອງເວົ້າຮອດພິກຂຸຜູ້ຢູ່ໃນອາຣາມໃກ້ເຮືອນເລີຍ" ດັ່ງນີ້ແລ

**ໂຄລິດສານິສູດທີ ໙ ຈົບ**

# ໑໐. ກິຕາຄິຣິສູດ

## ວ່າດ້ວຍເຫດການໃນກິຕາຄິຣີນິຄົມ

## ຄຸນຂອງການສັນອາຫານໜ້ອຍ

[໑໗໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນກາສີ ພ້ອມກັບພິກຂຸສົງໝູ່ໃຫຍ່ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫລາຍມາດ້ວຍຕັດວ່າ "ພິກຂຸທັງຫລາຍ ເຮົາບໍ່ສັນໂພຊະນະໃນຣາຕີເລີຍ ເຮົາເມື່ອບໍ່ສັນໂພຊະນະໃນຣາຕີ ກໍຮູ້ສຶກວ່າສຸກພາບມີໂຣຄາພາດໜ້ອຍ ເບົາຕົນໂຕ ມີພະລານາໄມສົມບູນ ຢູ່ສຸກສະບາຍ ມາເທີ້ນ ພິກຂຸທັງຫລາຍ ແມ່ນທ່ານທັງຫລາຍກໍຈົ່ງຢ່າສັນໂພຊະນະໃນຣາຕີເລີຍ ທ່ານທັງຫລາຍເມື່ອບໍ່ສັນໂພຊະນະໃນຣາຕີ ກໍຈັກຮູ້ສຶກວ່າ ສຸກພາບມີໂຣຄາພາດໜ້ອຍ ເບົາຕົນໂຕ ມີພະລານາໄມສົມບູນ ຢູ່ສຸກສະບາຍ"

ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປ ໃນແຄວ້ນກາສີໂດຍລຳດັບ ຈົນເຖິງນິຄົມຂອງຊາວກາສີຊື່ກີຕາຄີຣີ ໄດ້ຂ່າວວ່າຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ນິຄົມຂອງຊາວກາສີຊື່ ກີຕາຄີຣີ

## ພຣະອັດສະຊິແລະພຣະປຸນັບພະສຸກະສັນອາຫານໃນເວລາວິການ

[໑໗໕] ສະໄໝນັ້ນ ພິກຂຸຊື່ອັດສະຊິ ແລະ ພິກຂຸຊື່ປຸນັບພະສຸກະ ເປັນຜູ້ຢູ່ປະຈຳໃນນິຄົມຊື່ກີຕາຄີຣີ ຄັ້ງນັ້ນ ພິກຂຸຈຳນວນຫຼາຍເຂົ້າໄປຫາພິກຂຸຊື່ ອັດສະຊິ ແລະ ພິກຂຸຊື່ປຸນັບພະສຸກະຮອດບ່ອນຢູ່ ແລ້ວໄດ້ກ່າວວ່າ

"ທ່ານຜູ້ມີອາຍຸທັງຫລາຍ ພຣະຜູ້ມີພຣະພາກເຈົ້າ ແລະ ພິກຂຸສົງບໍ່ສັນໂພຊະນະໃນຣາຕີ ພຣະຜູ້ມີພຣະພາກເຈົ້າ ແລະ ພິກຂຸສົງເມື່ອບໍ່ສັນໂພຊະນະໃນຣາຕີ ກໍຮູ້ສຶກວ່າສຸກພາບມີໂຣຄາພາດໜ້ອຍ ເບົາຕົນໂຕ ມີພະລານາໄມສົມບູນ ຢູ່ສຸກສະບາຍ ມາເທີ້ນ ທ່ານຜູ້ມີອາຍຸທັງຫລາຍ ແມ່ນທ່ານທັງຫລາຍກໍຈົ່ງຢ່າສັນໂພຊະນະໃນຣາຕີເລີຍ ທ່ານທັງຫລາຍເມື່ອບໍ່ສັນໂພຊະນະໃນຣາຕີ ກໍຈັກຮູ້ສຶກວ່າສຸກພາບມີໂຣຄາພາດໜ້ອຍ ເບົາຕົນໂຕ ມີພະລານາໄມສົມບູນ ຢູ່ສຸກສະບາຍ"

ເມື່ອພິກຂຸທັງຫລາຍກ່າວແບບນີ້ແລ້ວ ພິກຂຸຊື່ ອັດສະຊິ ແລະ ພິກຂຸຊື່ປຸນັບພະສຸກະໄດ້ກ່າວວ່າ

"ທ່ານຜູ້ມີອາຍຸທັງຫລາຍ ເຮົາທັງຫລາຍສັນໂພຊະນະທັງເວລາແລງ ເວລາເຊົ້າ ແລະເວລາວິການກາງເວັນ ເຮົາທັງຫລາຍນັ້ນເມື່ອສັນໂພຊະນະທັງເວລາແລງ ເວລາເຊົ້າແລະເວລາວິການ ກາງເວັນ ກໍຮູ້ສຶກວ່າສຸກພາບມີໂຣຄາພາດໜ້ອຍ ເບົາຕົນໂຕ ມີພະລານາໄມສົມບູນ ຢູ່ສຸກສະບາຍ ເຮົາທັງຫລາຍນັ້ນຈັກລະຄຸນທີ່ຕົນເຫັນເອງແລ້ວໄລ່ຕາມຜົນທີ່ເປັນອະນາຄົດຕະການເຮັດຫຍັງ ເຮົາທັງຫລາຍຈັກສັນທັງເວລາແລງ ເວລາເຊົ້າ ແລະເວລາວິການກາງເວັນ"

ຍ້ອນເຫດທີ່ພິກຂຸເຫຼົ່ານັ້ນບໍ່ສາມາດຈະໃຫ້ພິກຂຸຊື່ອັດສະຊິແລະພິກຂຸຊື່ປຸນັບພະສຸກະ ຍິນ

ຍອມໄດ້ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂ້າພຣະອົງທັງຫລາຍເຂົ້າໄປຫາພິກຂຸຊື່ອັດສະຊິແລະພິກຂຸຊື່ປຸນັບພະສຸກະຮອດບ່ອນຢູ່ ແລ້ວໄດ້ກ່າວວ່າ "ທ່ານຜູ້ມີອາຍຸທັງຫລາຍ ພຣະຜູ້ມີພຣະພາກເຈົ້າແລະພິກຂຸສົງບໍ່ສັນໂພຊະນະໃນຣາຕີ ເມື່ອພຣະຜູ້ມີພຣະພາກເຈົ້າແລະພິກຂຸສົງບໍ່ສັນໂພຊະນະໃນຣາຕີ ກໍຮູ້ສຶກວ່າສຸກພາບມີໂຣຄາພາດໜ້ອຍ ເບົາຕົນໂຕ ມີພະລານາໄມສົມບູນ ຢູ່ສຸກສະບາຍ ມາເທີ້ນ ທ່ານຜູ້ມີອາຍຸທັງຫລາຍ ແມ່ນທ່ານທັງຫລາຍ ກໍຈົ່ງຢ່າສັນໂພຊະນະໃນຣາຕີເລີຍ ທ່ານທັງຫລາຍເມື່ອບໍ່ສັນໂພຊະນະໃນຣາຕີກໍຈະຮູ້ສຶກວ່າສຸກພາບມີໂຣຄາພາດໜ້ອຍ ເບົາຕົນໂຕ ມີພະລານາໄມສົມບູນ ຢູ່ສຸກສະບາຍ"

ເມື່ອຂ້າພຣະອົງທັງຫລາຍກ່າວແນວນີ້ແລ້ວ ພິກຂຸຊື່ອັດສະຊິແລະພິກຂຸຊື່ປຸນັບພະສຸກະໄດ້ກ່າວວ່າ "ທ່ານຜູ້ມີອາຍຸທັງຫລາຍ ເຮົາທັງຫລາຍສັນໂພຊະນະທັງເວລາແລງ ເວລາເຊົ້າ ແລະເວລາວິການກາງເວັນ ເມື່ອເຮົາທັງຫລາຍສັນໂພຊະນະທັງເວລາແລງ ເວລາເຊົ້າ ແລະເວລາ ວິການກາງເວັນ ກໍຮູ້ສຶກວ່າສຸກພາບມີໂຣຄາພາດໜ້ອຍ ເບົາຕົນໂຕ ມີພະລານາໄມສົມບູນ ຢູ່ສຸກສະບາຍ ເຮົາທັງຫລາຍນັ້ນ ຈັກລະຄຸນທີ່ຕົນເຫັນເອງແລ້ວໄລ່ຕາມຜົນທີ່ເປັນອະນາຄົດຕະການເຮັດຫຍັງ ເຮົາທັງຫລາຍຈັກສັນທັງເວລາແລງ ເວລາເຊົ້າ ແລະ ເວລາວິການກາງເວັນ" ຍ້ອນເຫດທີ່ຂ້າພຣະອົງທັງຫລາຍບໍ່ສາມາດຈະໃຫ້ພິກຂຸຊື່ອັດສະຊິ ແລະ ພິກຂຸຊື່ປຸນັບພະສຸກະ ຍິນຍອມໄດ້ ຈຶ່ງມາຂາບທູນເນື້ອຄວາມນີ້ແດ່ພຣະຜູ້ມີພຣະພາກເຈົ້າ ຂ້ານ້ອຍ"

[໑໗໘] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸຮູບໜຶ່ງມາຕັດວ່າ "ມາເທີ້ນພິກຂຸ ທ່ານຈົ່ງໄປຮຽກພິກຂຸຊື່ອັດສະຊິແລະພິກຂຸຊື່ປຸນັບພະສຸກະຕາມຄຳຂອງເຮົາວ່າ "ພຣະສາດສະດາ ຕັດຮຽກທ່ານທັງຫລາຍ"

ພິກຂຸນັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ເຂົ້າໄປຫາພິກຂຸຊື່ ອັດສະຊິແລະພິກຂຸຊື່ປຸນັບພະສຸກະ ຮອດບ່ອນຢູ່ ແລ້ວໄດ້ກ່າວວ່າ "ພຣະສາດສະດາຕັດຮຽກທ່ານທັງຫລາຍ"

ພິກຂຸຊື່ອັດສະຊິ ແລະ ພິກຂຸຊື່ປຸນັບພະສຸກະຮັບຄຳຂອງພິກຂຸນັ້ນແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພິກຂຸຊື່ ອັດສະຊິແລະພິກຂຸຊື່ປຸນັບພະສຸກະ ວ່າ

"ພິກຂຸທັງຫລາຍ ໄດ້ຂ່າວວ່າ ພິກຂຸເປັນຈຳນວນຫລາຍເຂົ້າໄປຫາທ່ານທັງສອງແລ້ວກ່າວວ່າ "ທ່ານຜູ້ມີອາຍຸທັງຫລາຍ ພຣະຜູ້ມີພຣະພາກເຈົ້າ ແລະ ພິກຂຸສົງບໍ່ສັນໂພຊະນະໃນຣາຕີ ພຣະຜູ້ມີພຣະພາກເຈົ້າ ແລະ ພິກຂຸສົງເມື່ອບໍ່ສັນໂພຊະນະໃນຣາຕີ ກໍຮູ້ສຶກວ່າສຸກພາບມີໂຣ

ຄາພາດໜ້ອຍ ເບົາຕົນໂຕ ມີພະລານາໄມສົມບູນ ຢູ່ສຸກສະບາຍ ມາເທີ້ນ ທ່ານຜູ້ມີອາຍຸທັງຫລາຍ ແມ່ນທ່ານທັງຫລາຍກໍຈົ່ງຢ່າສັນໂພຊະນະໃນຣາຕີເລີຍ ທ່ານທັງຫລາຍເມື່ອບໍ່ສັນໂພຊະນະໃນຣາຕີກໍຈະຮູ້ສຶກວ່າສຸກພາບມີໂຣຄາພາດໜ້ອຍ ເບົາຕົນໂຕ ມີພະລານາໄມສົມບູນຢູ່ສຸກສະບາຍ"

ໄດ້ຂ່າວວ່າ ເມື່ອພິກຂຸເຫຼົ່ານັ້ນ ກ່າວແນວນີ້ແລ້ວ ທ່ານທັງສອງໄດ້ກ່າວກັບພິກຂຸເຫຼົ່ານັ້ນແນວນີ້ວ່າ "ທ່ານຜູ້ມີອາຍຸທັງຫລາຍ ເຮົາທັງຫລາຍສັນໂພຊະນະທັງເວລາແລງ ເວລາເຊົ້າ ແລະເວລາວິການກາງເວັນ ເຮົາທັງຫລາຍເມື່ອສັນໂພຊະນະທັງເວລາແລງ ເວລາເຊົ້າ ແລະເວລາວິການກາງເວັນ ກໍຮູ້ສຶກວ່າສຸກພາບມີໂຣຄາພາດໜ້ອຍ ເບົາຕົນໂຕ ມີພະລານາໄມສົມບູນ ຢູ່ສຸກສະບາຍ ເຮົາທັງຫລາຍນັ້ນຈັກລະຄຸນທີ່ຕົນເຫັນເອງແລ້ວໄລ່ຕາມຜົນທີ່ເປັນອະນາຄົດຕະການເຮັດຫຍັງ ເຮົາທັງຫລາຍຈັກສັນທັງເວລາແລງ ເວລາເຊົ້າ ແລະ ເວລາວິການກາງເວັນ" ແມ່ນບໍ"

ພິກຂຸຊື່ອັດສະຊິແລະພິກຂຸຊື່ປຸນັບພະສຸກະ ຂາບທູນວ່າ "ແມ່ນແລ້ວ ຂ້ານ້ອຍ"

## ກຸສົນທຳແລະອະກຸສົນທຳກັບເວທະນາ ໓

[໑໗໗] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸທັງຫລາຍ ທ່ານທັງຫລາຍຮູ້ທົ່ວເຖິງທຳທີ່ເຮົາສະແດງແລ້ວແນວນີ້ວ່າ "ບຸກຄົນນີ້ສະເຫວີຍເວທະນາແນວໃດແນວໜຶ່ງ ຄື ສຸກຂະເວທະນາ ທຸກຂະເວທະນາ ຫຼື ອະທຸກຂະມະສຸກຂະເວທະນາ (ອຸເປກຂາ) ອະກຸສົນທຳຂອງບຸກຄົນນັ້ນຍ່ອມເສື່ອມ ກຸສົນທຳຍ່ອມຈະເລີນ" ແມ່ນບໍ?"

ພິກຂຸທັງຫລາຍທູນຕອບວ່າ "ບໍ່ແມ່ນ ຂ້ານ້ອຍ"

"ພິກຂຸທັງຫລາຍ ທ່ານທັງຫລາຍຮູ້ທົ່ວເຖິງທຳທີ່ເຮົາສະແດງແລ້ວ ແນວນີ້ວ່າ "ເມື່ອບຸກຄົນລາງຄົນໃນໂລກນີ້ສະເຫວີຍສຸກຂະເວທະນາເຫັນຢູ່ແນວນັ້ນຢູ່ ອະກຸສົນທຳຍ່ອມຈະເລີນ ກຸສົນທຳຍ່ອມເສື່ອມ ແຕ່ເມື່ອບຸກຄົນລາງຄົນໃນໂລກນີ້ສະເຫວີຍສຸກຂະເວທະນາເຫັນຢູ່ແນວນັ້ນຢູ່ ອະກຸສົນທຳຍ່ອມເສື່ອມ ກຸສົນທຳຍ່ອມຈະເລີນ ເມື່ອບຸກຄົນລາງຄົນໃນໂລກນີ້ສະເຫວີຍທຸກຂະເວທະນາເຫັນຢູ່ແນວນັ້ນຢູ່ ອະກຸສົນທຳຍ່ອມຈະເລີນ ກຸສົນທຳຍ່ອມເສື່ອມ ແຕ່ເມື່ອບຸກຄົນລາງຄົນໃນໂລກນີ້ສະເຫວີຍ ທຸກຂະເວທະນາເຫັນຢູ່ແນວນັ້ນຢູ່ ອະກຸສົນທຳຍ່ອມເສື່ອມ ກຸສົນທຳຍ່ອມຈະເລີນ ເມື່ອບຸກຄົນລາງຄົນໃນໂລກນີ້ສະເຫວີຍອະທຸກຂະມະສຸກຂະເວທະນາເຫັນຢູ່ແນວນັ້ນຢູ່ ອະກຸສົນທຳຍ່ອມຈະເລີນ ກຸສົນທຳ ຍ່ອມເສື່ອມ ແຕ່ເມື່ອບຸກຄົນລາງຄົນໃນໂລກນີ້ສະເຫວີຍອະທຸກຂະມະສຸກຂະເວທະນາເຫັນຢູ່ແນວນັ້ນຢູ່ ອະກຸສົນທຳຍ່ອມເສື່ອມ ກຸສົນທຳຍ່ອມຈະເລີນ ແມ່ນບໍ?"

"ແມ່ນ ຂ້ານ້ອຍ"

[໑໗໙] "ດີແລ້ວ ພິກຂຸທັງຫລາຍ ຂໍ້ນີ້ ຖ້າເຮົາບໍ່ຮູ້ ບໍ່ເຫັນ ບໍ່ຮູ້ ບໍ່ເຮັດ ໃຫ້ແຈ້ງ ບໍ່ສຳຜັດດ້ວຍປັນຍາວ່າ "ເມື່ອບຸກຄົນລາງຄົນໃນໂລກນີ້ ສະເຫວີຍສຸກຂະເວທະນາເຫັນຢູ່ແນວນັ້ນຢູ່ອະກຸສົນທຳຍ່ອມຈະເລີນ ກຸສົນທຳຍ່ອມເສື່ອມ" ເຮົາເມື່ອບໍ່ຮູ້ແນວນີ້ຈະເພິ່ງກ່າວວ່າ "ທ່ານທັງຫລາຍຈົ່ງລະສຸກຂະເວທະນາເຫັນຢູ່ແນວນັ້ນເທີ້ນ" ຂໍ້ນີ້ຈັກເປັນການສົມຄວນແກ່ເຮົາບໍ?"

"ບໍ່ ຂ້ານ້ອຍ"

"ຍ້ອນຂໍ້ນີ້ເຮົາຮູ້ແລ້ວ ເຫັນແລ້ວ ຮູ້ແລ້ວ ເຮັດໃຫ້ແຈ້ງແລ້ວ ສຳຜັດແລ້ວດ້ວຍ ປັນຍາວ່າ "ເມື່ອບຸກຄົນລາງຄົນໃນໂລກນີ້ສະເຫວີຍສຸກຂະເວທະນາເຫັນຢູ່ແນວນັ້ນຢູ່ ອະກຸສົນທຳຍ່ອມຈະເລີນ ກຸສົນທຳຍ່ອມເສື່ອມ" ສັນນັ້ນ ເຮົາຈຶ່ງກ່າວວ່າ "ທ່ານທັງຫລາຍຈົ່ງລະສຸກຂະເວທະນາເຫັນຢູ່ແນວນັ້ນເທີ້ນ" ຂໍ້ນີ້ຖ້າເຮົາບໍ່ຮູ້ ບໍ່ເຫັນ ບໍ່ຮູ້ ບໍ່ເຮັດໃຫ້ແຈ້ງ ບໍ່ສຳຜັດດ້ວຍປັນຍາວ່າ "ເມື່ອບຸກຄົນລາງຄົນໃນໂລກນີ້ສະເຫວີຍສຸກຂະເວທະນາເຫັນຢູ່ແນວນັ້ນຢູ່ ອະກຸສົນທຳຍ່ອມເສື່ອມ ກຸສົນທຳຍ່ອມຈະເລີນ" ເຮົາເມື່ອບໍ່ຮູ້ແນວນີ້ຈະເພິ່ງກ່າວວ່າ "ທ່ານທັງຫລາຍຈົ່ງເຂົ້າເຖິງສຸກຂະເວທະນາເຫັນຢູ່ແນວນັ້ນຢູ່ເທີ້ນ" ຂໍ້ນີ້ຈັກເປັນການສົມຄວນແກ່ເຮົາບໍ?"

"ບໍ່ ຂ້ານ້ອຍ"

"ພິກຂຸທັງຫລາຍ ຍ້ອນຂໍ້ນີ້ເຮົາຮູ້ແລ້ວ ເຫັນແລ້ວ ຮູ້ແລ້ວ ເຮັດໃຫ້ແຈ້ງແລ້ວ ສຳຜັດແລ້ວດ້ວຍປັນຍາວ່າ "ເມື່ອບຸກຄົນລາງຄົນໃນໂລກນີ້ສະເຫວີຍສຸກຂະເວທະນາເຫັນຢູ່ແນວນັ້ນຢູ່ ອະກຸສົນທຳຍ່ອມເສື່ອມ ກຸສົນທຳຍ່ອມຈະເລີນ" ສັນນັ້ນ ເຮົາຈຶ່ງກ່າວວ່າ "ທ່ານທັງຫລາຍ ຈົ່ງເຂົ້າເຖິງສຸກຂະເວທະນາເຫັນຢູ່ແນວນັ້ນຢູ່ເທີ້ນ"

[໑໘໐] ພິກຂຸທັງຫລາຍ ຂໍ້ນີ້ຖ້າເຮົາບໍ່ຮູ້ ບໍ່ເຫັນ ບໍ່ຮູ້ ບໍ່ເຮັດໃຫ້ແຈ້ງ ບໍ່ສຳຜັດດ້ວຍປັນຍາວ່າ "ເມື່ອບຸກຄົນລາງຄົນໃນໂລກນີ້ສະເຫວີຍທຸກຂະເວທະນາເຫັນຢູ່ແນວນັ້ນຢູ່ ອະກຸສົນທຳຍ່ອມຈະເລີນ ກຸສົນທຳຍ່ອມເສື່ອມ" ເຮົາເມື່ອບໍ່ຮູ້ແນວນີ້ ຈະເພິ່ງກ່າວວ່າ "ທ່ານທັງຫລາຍຈົ່ງລະທຸກຂະເວທະນາເຫັນຢູ່ແນວນັ້ນເທີ້ນ" ຂໍ້ນີ້ເປັນການສົມຄວນແກ່ເຮົາບໍ?"

"ບໍ່ ຂ້ານ້ອຍ"

"ຍ້ອນຂໍ້ນີ້ເຮົາຮູ້ແລ້ວ ເຫັນແລ້ວ ຮູ້ແລ້ວ ເຮັດໃຫ້ແຈ້ງແລ້ວ ສຳຜັດແລ້ວດ້ວຍ ປັນຍາວ່າ "ເມື່ອບຸກຄົນລາງຄົນໃນໂລກນີ້ສະເຫວີຍທຸກຂະເວທະນາເຫັນຢູ່ແນວນັ້ນຢູ່ ອະກຸສົນທຳຍ່ອມຈະເລີນ ກຸສົນທຳຍ່ອມເສື່ອມ" ສັນນັ້ນ ເຮົາຈຶ່ງກ່າວວ່າ "ທ່ານທັງຫລາຍຈົ່ງລະທຸກຂະເວທະນາເຫັນຢູ່ແນວນັ້ນເທີ້ນ" ຂໍ້ນີ້ຖ້າເຮົາບໍ່ຮູ້ ບໍ່ເຫັນ ບໍ່ຮູ້ ບໍ່ເຮັດໃຫ້ແຈ້ງ ບໍ່ສຳຜັດດ້ວຍປັນຍາວ່າ "ເມື່ອບຸກຄົນລາງຄົນໃນໂລກນີ້ສະເຫວີຍທຸກຂະເວທະນາເຫັນຢູ່ແນວນັ້ນຢູ່ ອະກຸສົນທຳຍ່ອມເສື່ອມ ກຸສົນທຳຍ່ອມຈະເລີນ" ເຮົາເມື່ອບໍ່ຮູ້ແນວນີ້ ຈະເພິ່ງກ່າວວ່າ "ທ່ານທັງຫລາຍ ຈົ່ງເຂົ້າເຖິງທຸກຂະເວທະນາເຫັນຢູ່ແນວນັ້ນຢູ່ເທີ້ນ" ຂໍ້ນີ້ຈັກເປັນການສົມຄວນແກ່ເຮົາບໍ?"

"ບໍ່ ຂ້ານ້ອຍ"

"ພິກຂຸທັງຫລາຍ ຍ້ອນຂໍ້ນີ້ເຮົາຮູ້ແລ້ວ ເຫັນແລ້ວ ຮູ້ແລ້ວ ເຮັດໃຫ້ແຈ້ງແລ້ວ ສຳຜັດແລ້ວດ້ວຍປັນຍາວ່າ "ເມື່ອບຸກຄົນລາງຄົນໃນໂລກນີ້ສະເຫວີຍທຸກຂະເວທະນາເຫັນຢູ່ແນວນັ້ນຢູ່ ອະກຸສົນທຳຍ່ອມເສື່ອມ ກຸສົນທຳຍ່ອມຈະເລີນ" ສັນນັ້ນ ເຮົາຈຶ່ງກ່າວວ່າ "ທ່ານທັງຫລາຍ ຈົ່ງເຂົ້າເຖິງທຸກຂະເວທະນາເຫັນຢູ່ແນວນັ້ນຢູ່ເທີ້ນ"

[໑໗໐] ພິກຂຸທັງຫລາຍ ຂໍ້ນີ້ຖ້າເຮົາບໍ່ຮູ້ ບໍ່ເຫັນ ບໍ່ຮູ້ ບໍ່ເຮັດໃຫ້ແຈ້ງ ບໍ່ສຳຜັດແລ້ວດ້ວຍປັນຍາວ່າ "ເມື່ອບຸກຄົນລາງຄົນໃນໂລກນີ້ ສະເຫວີຍອະທຸກຂະມະສຸກຂະເວທະນາເຫັນຢູ່ແນວນັ້ນຢູ່ອະກຸສົນທຳຍ່ອມຈະເລີນ ກຸສົນທຳຍ່ອມເສື່ອມ" ເຮົາເມື່ອບໍ່ຮູ້ແນວນີ້ ຈະເພິ່ງ ກ່າວວ່າ "ທ່ານທັງຫລາຍຈົ່ງລະອະທຸກຂະມະສຸກຂະເວທະນາເຫັນຢູ່ແນວນັ້ນເທີ້ນ" ຂໍ້ນີ້ເປັນການສົມຄວນແກ່ເຮົາບໍ?"

"ບໍ່ ຂ້ານ້ອຍ"

"ຍ້ອນຂໍ້ນີ້ເຮົາຮູ້ແລ້ວ ເຫັນແລ້ວ ຮູ້ແລ້ວ ເຮັດໃຫ້ແຈ້ງແລ້ວ ສຳຜັດແລ້ວດ້ວຍ ປັນຍາວ່າ "ເມື່ອບຸກຄົນລາງຄົນໃນໂລກນີ້ສະເຫວີຍອະທຸກຂະມະສຸກຂະເວທະນາເຫັນຢູ່ແນວນັ້ນຢູ່ ອະກຸສົນທຳ ຍ່ອມຈະເລີນ ກຸສົນທຳຍ່ອມເສື່ອມ" ສັນນັ້ນ ເຮົາຈຶ່ງກ່າວວ່າ "ທ່ານທັງຫລາຍຈົ່ງລະອະທຸກຂົມສຸກຂະເວທະນາເຫັນຢູ່ແນວນັ້ນເທີ້ນ" ຂໍ້ນີ້ຖ້າເຮົາບໍ່ຮູ້ ບໍ່ເຫັນ ບໍ່ຮູ້ ບໍ່ເຮັດໃຫ້ແຈ້ງ ບໍ່ສຳຜັດດ້ວຍປັນຍາວ່າ "ເມື່ອບຸກຄົນລາງຄົນໃນໂລກນີ້ສະເຫວີຍອະທຸກຂະມະສຸກຂະເວທະນາເຫັນຢູ່ແນວນັ້ນຢູ່ ອະກຸສົນທຳຍ່ອມເສື່ອມ ກຸສົນທຳຍ່ອມຈະເລີນ" ເຮົາເມື່ອບໍ່ຮູ້ແນວນີ້ ຈະເພິ່ງກ່າວວ່າ "ທ່ານທັງຫລາຍຈົ່ງເຂົ້າເຖິງອະທຸກຂະມະສຸກຂະເວທະນາເຫັນຢູ່ແນວນັ້ນຢູ່ເທີ້ນ" ຂໍ້ນີ້ຈັກເປັນການສົມຄວນແກ່ເຮົາບໍ?"

"ບໍ່ ຂ້ານ້ອຍ"

"ພິກຂຸທັງຫລາຍ ຍ້ອນຂໍ້ນີ້ເຮົາຮູ້ແລ້ວ ເຫັນແລ້ວ ຮູ້ແລ້ວ ເຮັດໃຫ້ແຈ້ງແລ້ວ ສຳຜັດແລ້ວດ້ວຍປັນຍາວ່າ "ເມື່ອບຸກຄົນລາງຄົນໃນໂລກນີ້ສະເຫວີຍອະທຸກຂະມະສຸກຂະເວທະນາເຫັນຄືນີ້ຢູ່ ອະກຸສົນທຳຍ່ອມເສື່ອມ ກຸສົນທຳຍ່ອມຈະເລີນ" ສັນນັ້ນ ເຮົາຈຶ່ງກ່າວວ່າ "ທ່ານທັງຫລາຍຈົ່ງເຂົ້າເຖິງອະທຸກຂະມະສຸກຂະເວທະນາເຫັນຢູ່ແນວນັ້ນຢູ່ເທີ້ນ"

[໑໗໑] ພິກຂຸທັງຫລາຍ ເຮົາບໍ່ໄດ້ກ່າວວ່າ "ພິກຂຸທັງໝົດຈະຕ້ອງເຮັດກິດທີ່ຄວນເຮັດດ້ວຍຄວາມບໍ່ຜະໝາດ" ທັງບໍ່ໄດ້ກ່າວວ່າ "ພິກຂຸທັງໝົດບໍ່ຕ້ອງເຮັດກິດທີ່ຄວນເຮັດດ້ວຍ ຄວາມບໍ່ຜະໝາດ" ພິກຂຸເຫຼົ່າໃດເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ ຄວນເຮັດສຳເລັດແລ້ວ ປົງພາລະແລ້ວ ບັນລຸປະໂຫຍດຕົນແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງ ເຮົາຍ່ອມກ່າວວ່າ "ພິກຂຸເຫັນປານນັ້ນບໍ່ຕ້ອງເຮັດກິດທີ່ຄວນເຮັດດ້ວຍ

ຄວາມບໍ່ຜະໝາດ” ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນພິກຂຸນັ້ນໄດ້ເຮັດກິດທີ່ຄວນເຮັດດ້ວຍຄວາມບໍ່ຜະໝາດສຳເລັດແລ້ວ ແລະພິກຂຸເຫຼົ່ານັ້ນຈັດເປັນຜູ້ບໍ່ຜະໝາດຕໍ່ໄປ

ພິກຂຸທັງຫລາຍ ພິກຂຸເຫຼົ່າໃດເປັນເສຂະຍັງບໍ່ສຳເລັດເປັນອະຣະຫັນຕ໌ ຍັງປາຖະໜາທຳທີ່ເປັນແດນກະເສມຈາກໂຍຄະອັນປະເສີດຢູ່ ເຮົາກ່າວວ່າ “ພິກຂຸເຫັນປານນັ້ນ ຕ້ອງເຮັດກິດທີ່ຄວນເຮັດດ້ວຍຄວາມບໍ່ຜະໝາດ” ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນເຮົາເຫັນຜົນແຫ່ງຄວາມບໍ່ຜະໝາດຂອງພິກຂຸເຫລົ່ານີ້ແນວນີ້ວ່າ “ຈະເປັນການດີຖ້າທ່ານເຫລົ່ານີ້ ເມື່ອໃຊ້ສອຍເສນາສະນະທີ່ສົມຄວນ ຄົບຫາກັນລະຍານະມິດ ປັບອິນຊີໃຫ້ສະເໝີ ຈະເພິ່ງເຮັດໃຫ້ແຈ້ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ” ຈຶ່ງກ່າວວ່າ “ພິກຂຸເຫັນປານນັ້ນຕ້ອງເຮັດກິດທີ່ຄວນເຮັດດ້ວຍຄວາມບໍ່ຜະໝາດ”

## ບຸກຄົນ ໗ ຈຳພວກ

[໑໘໔] ພິກຂຸທັງຫລາຍ ບຸກຄົນ ໗ ຈຳພວກນີ້ໆມີຜາກົດຢູ່ໃນໂລກ

ບຸກຄົນ ໗ ຈຳພວກ ໃດແດ່ ຄື

໑. ທ່ານຜູ້ເປັນອຸພະໂຕພາຄະວິມຸຕ
໒. ທ່ານຜູ້ເປັນປັນຍາວິມຸດ
໓. ທ່ານຜູ້ເປັນກາຍະສັກຂີ
໔. ທ່ານຜູ້ເປັນທິດຖິປັດຕະ
໕. ທ່ານຜູ້ເປັນສັດທາວິມຸດ
໖. ທ່ານຜູ້ເປັນທຳມານຸສາຣີ
໗. ທ່ານຜູ້ເປັນສັດທານຸສາຣີ

ທ່ານຜູ້ເປັນອຸພະໂຕພາຄະວິມຸຕ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ໄດ້ສຳຜັດສັນຕະວິໂມກ ເຊິ່ງບໍ່ມີຮູບຍ້ອນລ່ວງຮູບຊານໄດ້ດ້ວຍກາຍຢູ່ ແລະ ອາສະວະທັງຫລາຍຂອງຜູ້ນັ້ນສິ້ນໄປຍ້ອນເຫັນດ້ວຍປັນຍາ ບຸກຄົນນີ້ເຮົາຮຽກວ່າ ເປັນອຸພະໂຕພາຄະວິມຸຕ ເຮົາກ່າວວ່າ “ພິກຂຸນີ້ບໍ່ຕ້ອງເຮັດກິດທີ່ຄວນເຮັດດ້ວຍຄວາມບໍ່ຜະໝາດ” ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນພິກຂຸນັ້ນໄດ້ເຮັດກິດທີ່ຄວນເຮັດດ້ວຍຄວາມບໍ່ຜະໝາດສຳເລັດແລ້ວ ແລະພິກຂຸນັ້ນຈັດເປັນຜູ້ບໍ່ຜະໝາດຕໍ່ໄປ (໑)

ທ່ານຜູ້ເປັນປັນຍາວິມຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ໄດ້ສໍາຜັດສັນຕະວິໂມກ ເຊິ່ງບໍ່ມີຮູບຍ້ອນລ່ວງຮູບຊານໄດ້ດ້ວຍກາຍຢູ່ ແລະ ອາສະວະທັງຫລາຍຂອງຜູ້ນັ້ນສິ້ນໄປ ຍ້ອນເຫັນດ້ວຍປັນຍາ ບຸກຄົນນີ້ເຮົາຮຽກວ່າ ເປັນປັນຍາວິມຸດ ເຮົາກ່າວວ່າ "ພິກຂຸແມ່ນນີ້ບໍ່ຕ້ອງເຮັດກິດທີ່ຄວນເຮັດດ້ວຍຄວາມບໍ່ຜະໝາດ" ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນພິກຂຸນັ້ນໄດ້ເຮັດກິດທີ່ຄວນເຮັດດ້ວຍຄວາມບໍ່ຜະໝາດສໍາເລັດແລ້ວ ແລະ ພິກຂຸນັ້ນຈັດເປັນຜູ້ບໍ່ຜະໝາດຕໍ່ໄປ (໘)

ທ່ານຜູ້ເປັນກາຍະສັກຂີ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ໄດ້ສໍາຜັດສັນຕະວິໂມກ ເຊິ່ງບໍ່ມີຮູບ ຍ້ອນລ່ວງຮູບຊານ ໄດ້ດ້ວຍກາຍຢູ່ ແລະ ອາສະວະບາງເຫຼົ່າຂອງຜູ້ນັ້ນສິ້ນໄປຍ້ອນເຫັນດ້ວຍປັນຍາ ບຸກຄົນນີ້ເຮົາຮຽກວ່າ ເປັນກາຍະສັກຂີ ເຮົາກ່າວວ່າ "ພິກຂຸແມ່ນນີ້ຕ້ອງເຮັດກິດທີ່ຄວນເຮັດດ້ວຍຄວາມບໍ່ຜະໝາດ" ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນເຮົາເຫັນຜົນແຫ່ງຄວາມບໍ່ຜະໝາດຂອງພິກຂຸນີ້ແນວນີ້ວ່າ "ຈະເປັນການດີ ຖ້າທ່ານຜູ້ນີ້ເມື່ອໃຊ້ສອຍເສນາສະນະທີ່ສົມຄວນ ຄົບຫາກັນລະຍານະມິດ ປັບອິນຊີໃຫ້ສະເໝີ ຈະເພິ່ງເຮັດໃຫ້ແຈ້ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ຈຶ່ງກ່າວວ່າ "ພິກຂຸນີ້ຕ້ອງເຮັດກິດທີ່ຄວນເຮັດດ້ວຍຄວາມບໍ່ຜະໝາດ" (໙)

ທ່ານຜູ້ເປັນທິດຖິປັດຕະ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ໄດ້ສໍາຜັດສັນຕະວິໂມກ ເຊິ່ງບໍ່ມີຮູບຍ້ອນລ່ວງຮູບຊານໄດ້ດ້ວຍກາຍຢູ່ ແຕ່ອາສະວະບາງເຫຼົ່າຂອງຜູ້ນັ້ນສິ້ນໄປຍ້ອນເຫັນດ້ວຍປັນຍາ ອັນໜຶ່ງ ທໍາທັງຫລາຍທີ່ຕະຖາຄົດປະກາດແລ້ວ ເປັນທໍາທີ່ຜູ້ນັ້ນເຫັນແຈ້ງດ້ວຍປັນຍາ ປະພຶດດີແລ້ວ ບຸກຄົນນີ້ເຮົາຮຽກວ່າ ເປັນທິດຖິປັດຕະ ເຮົາກ່າວວ່າ "ພິກຂຸນີ້ຕ້ອງເຮັດກິດທີ່ຄວນເຮັດດ້ວຍຄວາມ ບໍ່ຜະໝາດ" ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນເຮົາເຫັນຜົນແຫ່ງຄວາມບໍ່ຜະໝາດຂອງພິກຂຸນີ້ແນວນີ້ວ່າ "ຈະເປັນການດີ ຖ້າທ່ານຜູ້ນີ້ເມື່ອໃຊ້ສອຍເສນາສະນະທີ່ສົມຄວນ ຄົບຫາກັນລະຍານະມິດ ປັບອິນຊີໃຫ້ສະເໝີ ຈະເພິ່ງເຮັດໃຫ້ແຈ້ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ຈຶ່ງ

ກ່າວວ່າ "ພິກຂຸນີ້ຕ້ອງເຮັດກິດທີ່ຄວນເຮັດດ້ວຍຄວາມບໍ່ຜະໝາດ" (໔)

ທ່ານຜູ້ເປັນສັດທາວິມຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ໄດ້ສຳຜັດສັນຕະວິໂມກ ເຊິ່ງບໍ່ມີຮູບຍ້ອນລ່ວງຮູບຊານໄດ້ດ້ວຍກາຍຢູ່ ແຕ່ອາສະວະບາງເຫຼົ່າຂອງຜູ້ນັ້ນສິ້ນໄປ ຍ້ອນເຫັນດ້ວຍປັນຍາ ອັນໜຶ່ງ ຄວາມເຊື່ອໃນຕະຖາຄົດຂອງຜູ້ນັ້ນຕັ້ງໝັ້ນແລ້ວ ມີຮາກຢັ່ງລົງໝັ້ນຄົງແລ້ວ ບຸກຄົນນີ້ເຮົາຮຽກວ່າ ເປັນສັດທາວິມຸດ ເຮົາກ່າວວ່າ "ພິກຂຸແມ່ນນີ້ຕ້ອງເຮັດກິດທີ່ຄວນເຮັດດ້ວຍຄວາມບໍ່ຜະໝາດ" ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນເຮົາເຫັນຜົນແຫ່ງຄວາມບໍ່ຜະໝາດຂອງພິກຂຸນີ້ແນວນີ້ວ່າ "ຈະເປັນການດີ ຖ້າທ່ານຜູ້ນີ້ເມື່ອໃຊ້ສອຍເສນາສະນະທີ່ສົມຄວນ ຄົບຫາກັນລະຍານະມິດ ປັບອິນຊີໃຫ້ສະເໝີ ຈະເພິ່ງເຮັດໃຫ້ແຈ້ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ຈຶ່ງກ່າວວ່າ "ພິກຂຸນີ້ຕ້ອງເຮັດກິດທີ່ຄວນເຮັດດ້ວຍຄວາມບໍ່ຜະໝາດ" (໕)

ທ່ານຜູ້ເປັນທຳມານຸສາຣີ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ໄດ້ສຳຜັດສັນຕະວິໂມກ ເຊິ່ງບໍ່ມີຮູບຍ້ອນລ່ວງຮູບຊານໄດ້ດ້ວຍກາຍຢູ່ ແຕ່ອາສະວະບາງເຫຼົ່າຂອງຜູ້ນັ້ນສິ້ນໄປຍ້ອນເຫັນດ້ວຍປັນຍາ ອັນໜຶ່ງ ທຳທັງຫລາຍທີ່ຕະຖາຄົດປະກາດແລ້ວ ຄວນເພື່ອພິນິດໂດຍປະມານດ້ວຍປັນຍາຂອງຜູ້ນັ້ນ

ອີກປະການໜຶ່ງ ທຳເຫລົ່ານີ້ ຄື ສັດທິນຊີ (ອິນຊີຄືສັດທາ) ວິຣິຍິນຊີ (ອິນຊີຄືວິຣິຍະ) ສະຕິນຊີ (ອິນຊີຄືສະຕິ) ສະມາທິນຊີ (ອິນຊີຄືສະມາທິ) ປັນຍິນຊີ (ອິນຊີຄືປັນຍາ) ຍ່ອມມີແກ່ຜູ້ນັ້ນ ບຸກຄົນນີ້ເຮົາຮຽກວ່າ ເປັນທຳມານຸສາຣີ ເຮົາກ່າວວ່າ "ພິກຂຸແມ່ນນີ້ຕ້ອງເຮັດກິດທີ່ຄວນເຮັດດ້ວຍຄວາມບໍ່ຜະໝາດ" ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນເຮົາເຫັນຜົນແຫ່ງຄວາມບໍ່ຜະໝາດຂອງພິກຂຸນີ້ແນວນີ້ວ່າ "ຈະເປັນການດີ ຖ້າທ່ານຜູ້ນີ້ເມື່ອໃຊ້ສອຍເສນາສະນະທີ່ສົມຄວນ ຄົບຫາກັນລະຍານະມິດ ປັບອິນຊີໃຫ້ສະເໝີ ຈະເພິ່ງເຮັດໃຫ້ແຈ້ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ຈຶ່ງກ່າວວ່າ "ພິກຂຸນີ້ຕ້ອງເຮັດກິດທີ່ຄວນເຮັດດ້ວຍຄວາມບໍ່ຜະໝາດ" (໖)

ທ່ານຜູ້ເປັນສັດທານຸສາຣີ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ບໍ່ໄດ້ສຳຜັດສັນຕະວິໂມກ ເຊິ່ງບໍ່ມີຮູບຍ້ອນລ່ວງຮູບຊານໄດ້ດ້ວຍກາຍຢູ່ ແຕ່ອາສະວະບາງເຫຼົ່າຂອງຜູ້ນັ້ນສິ້ນໄປຍ້ອນເຫັນດ້ວຍປັນຍາ ອັນໜຶ່ງ ຜູ້ນັ້ນມີແຕ່ພຽງຄວາມເຊື່ອ ຄວາມຮັກໃນຕະຖາຄົດ

ອີກປະການໜຶ່ງ ທຳເຫລົ່ານີ້ ຄື ສັດທິນຊີ ວິຣິຍິນຊີ ສະຕິນຊີ ສະມາທິນຊີ ປັນຍິນຊີ ຍ່ອມມີແກ່ຜູ້ນັ້ນ ບຸກຄົນນີ້ເຮົາຮຽກວ່າ ເປັນສັດທານຸສາຣີ ເຮົາກ່າວວ່າ "ພິກຂຸແມ່ນນີ້ຕ້ອງເຮັດກິດທີ່ຄວນເຮັດດ້ວຍຄວາມບໍ່ຜະໝາດ" ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນເຮົາເຫັນຜົນແຫ່ງຄວາມບໍ່ຜະໝາດຂອງພິກຂຸນີ້ແນວນີ້ວ່າ "ຈະເປັນການດີ ຖ້າທ່ານຜູ້ນີ້ເມື່ອໃຊ້ສອຍເສນາສະນະທີ່ສົມຄວນ ຄົບຫາກັນລະຍານະມິດ ປັບອິນຊີໃຫ້ສະເໝີ ຈະເພິ່ງເຮັດໃຫ້ແຈ້ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ຈຶ່ງກ່າວວ່າ "ພິກຂຸນີ້ຕ້ອງເຮັດກິດທີ່ຄວນເຮັດດ້ວຍຄວາມບໍ່ຜະໝາດ" (ກ)

## ການດຳລົງຢູ່ໃນອະຣະຫັດຕະຜົນ

[໑໗໓] ພິກຂຸທັງຫລາຍ ເຮົາບໍ່ກ່າວການບັນລຸອະຣະຫັດຕະຜົນດ້ວຍຂັ້ນດຽວທີ່ນັ້ນ ແຕ່ການບັນລຸອະຣະຫັດຕະຜົນ ຍ່ອມມີໄດ້ດ້ວຍການພ່ຳເພັງສິກຂາໂດຍລຳດັບ ດ້ວຍການພ່ຳເພັງກິຣິຍາໂດຍລຳດັບ ດ້ວຍການພ່ຳເພັງປະຕິປະທາໂດຍລຳດັບ

ການບັນລຸອະຣະຫັດຕະຜົນ ຍ່ອມມີໄດ້ດ້ວຍການພ່ຳເພັງສິກຂາໂດຍລຳດັບ ດ້ວຍການພ່ຳເພັງກິຣິຍາໂດຍລຳດັບ ດ້ວຍການພ່ຳເພັງປະຕິປະທາໂດຍລຳດັບ ເປັນແນວໃດ?

ຄື ກຸນລະບຸດໃນສາດສະໜານີ້ ເກີດສັດທາແລ້ວຍ່ອມເຂົ້າໄປຫາ ເມື່ອເຂົ້າໄປຫາຍ່ອມນັ່ງໃກ້ ເມື່ອນັ່ງໃກ້ຍ່ອມງ່ຽງໂສດລົງສະດັບ ງ່ຽງໂສດລົງສະດັບແລ້ວຍ່ອມຟັງທຳ ເມື່ອຟັງທຳແລ້ວຍ່ອມຊົງຈຳໄວ້ ຍ່ອມພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ແລ້ວ ເມື່ອພິຈາລະນາ ເນື້ອຄວາມຢູ່ ທຳທັງຫລາຍຍ່ອມຄວນເພ່ງພິນິດ ເມື່ອມີການເພ່ງພິນິດທຳຢູ່ ສັນທະ ຍ່ອມເກີດ ກຸນລະບຸດນັ້ນເກີດສັນທະແລ້ວ ຍ່ອມອຸດສາຫະ ເມື່ອອຸດສາຫະແລ້ວ ຍ່ອມຮິ່ນຕອງ ເມື່ອຮິ່ນຕອງແລ້ວ ຍ່ອມອຸທິດກາຍແລະໃຈ ເມື່ອອຸທິດກາຍແລະໃຈແລ້ວ ຍ່ອມເຮັດໃຫ້ແຈ້ງ ສັດຈະອັນປະເສີດ໔ດ້ວຍນາມກາຍ ແລະ ເຫັນແຈ້ງຊັດສັດຈະອັນປະເສີດນັ້ນດ້ວຍປັນຍາ

ພິກຂຸທັງຫລາຍ ຖ້າສັດທາບໍ່ມີ ການເຂົ້າໄປຫາ ການນັ່ງໃກ້ ການງ່ຽງໂສດລົງສະດັບ ການຟັງທຳ ການຊົງຈຳທຳ ການພິຈາລະນາເນື້ອຄວາມ ຄວາມເພ່ງພິນິດທຳສັນທະ ອຸດສາຫະ ການຮິ່ນຕອງ ແລະການອຸທິດກາຍແລະໃຈກໍບໍ່ມີ ທ່ານທັງຫລາຍເປັນຜູ້ປະຕິບັດພາດ ເປັນຜູ້

ປະຕິບັດຜິດ ໂມຄະບຸຣຸດເຫລົ່ານີ້ໄດ້ກ້າວອອກໄປຈາກທຳວິໄນນີ້ໄກທີ່ໃດ

[໑໗໔] ພິກຂຸທັງຫລາຍ ຄຳອະທິບາຍສັດຈະ ໔ ປະການມີຢູ່ ເມື່ອຍົກຄຳອະທິບາຍ ດັ່ງກ່າວຂຶ້ນມາສະແດງ ວິນຍູຊົນເພິ່ງເຂົ້າໃຈເນື້ອຄວາມໄດ້ດ້ວຍປັນຍາໃນບໍ່ຊ້າ ເຮົາຈັກສະແດງແກ່ທ່ານທັງຫລາຍ ທ່ານທັງຫລາຍຈັກເຂົ້າໃຈເຖິງເນື້ອຄວາມໄດ້"

ພິກຂຸທັງຫລາຍຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫລາຍເປັນຄົນຢ່າງໃດ ແລະຜູ້ເຂົ້າໃຈເຖິງທຳໄດ້ ເປັນຄົນຢ່າງໃດ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫລາຍ ສາດສະດາໃດເປັນຜູ້ໜັກໃນອາມິດ ຮັບແຕ່ອາມິດຢູ່ ຂ້ອງຢູ່ດ້ວຍອາມິດ ແມ່ນສາດສະດານັ້ນກໍຍັງບໍ່ຕໍ່ຮອງເລີຍວ່າ "ເມື່ອສິ່ງແນວນີ້ເພິ່ງມີແກ່ເຮົາ ເຮົາເພິ່ງເຮັດສິ່ງນັ້ນ ເມື່ອສິ່ງແນວນີ້ບໍ່ເພິ່ງມີແກ່ເຮົາ ເຮົາກໍບໍ່ເພິ່ງເຮັດສິ່ງນັ້ນ" ຕະຖາຄົດບໍ່ຂ້ອງຢູ່ດ້ວຍອາມິດໂດຍປະການທັງປວງຈະສົມຄວນກັບການຕໍ່ຮອງຫຼື ສາວົກຜູ້ມີສັດທາ ຜູ້ເຮັດຕາມຄຳສັ່ງສອນຂອງສາດສະດາ ຍ່ອມມີຫລັກປະຕິບັດວ່າ "ພຣະຜູ້ມີພຣະພາກເຈົ້າເປັນສາດສະດາ ເຮົາເປັນສາວົກ ພຣະຜູ້ມີພຣະພາກເຈົ້າຊົງຮູ້ ເຮົາບໍ່ຮູ້"

ຄຳສອນຂອງສາດສະດາຍ່ອມງອກງາມມີໂອຊາແກ່ສາວົກຜູ້ມີສັດທາ ຜູ້ເຮັດຕາມຄຳສັ່ງສອນຂອງສາດສະດາ ສາວົກຜູ້ມີສັດທາ ຜູ້ເຮັດຕາມຄຳສັ່ງສອນຂອງສາດສະດາ ຍ່ອມມີຫລັກປະຕິບັດວ່າ "ໜັງ ເອັນ ແລະກະດູກຈົ່ງເຫືອດແຫ້ງໄປເທີ້ນ ຊີ້ນແລະເລືອດໃນສະຣີຣະຂອງເຮົາຈົ່ງເຫືອດແຫ້ງ ໄປກໍຕາມທີ ເມື່ອເຮົາຍັງບໍ່ບັນລຸຜົນທີ່ເພິ່ງບັນລຸດ້ວຍເຫື່ອແຮງຂອງບຸຣຸດ ດ້ວຍຄວາມພຽນຂອງ ບຸຣຸດດ້ວຍຄວາມບາກບັ່ນຂອງບຸຣຸດແລ້ວ ຈັກບໍ່ຢຸດຄວາມພຽນນັ້ນ"

ພິກຂຸທັງຫລາຍ ສາວົກຜູ້ມີສັດທາ ຜູ້ເຮັດຕາມຄຳສັ່ງສອນຂອງສາດສະດາ ຈະເພິ່ງຫວັງໄດ້ຜົນແນວ ໑ ໃນ ໒ ແນວ ຄື (໑) ອະຣະຫັດຕະຜົນໃນປັດຈຸບັນ (໒) ເມື່ອມີອຸປາທານເຫຼືອຢູ່ກໍຈະເປັນອະນາຄາມີ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ກີຕາຄິຣິສູດທີ່ ໑໐ ຈົບ**

**ພິກຂຸວັກທີ່ ໒ ຈົບ**

### ລວມພຣະສູດທີ່ ມີໃນວັກນີ້ ຄື



# ໒. ປະຣິບພາຊະກະວັກ

### ໝວດວ່າດ້ວຍປະຣິພາຊົກ

## ໑. ຈູລະວັດສະໂຄດຕະສູດ

### ວ່າດ້ວຍປະຣິພາຊົກຊື່ວັດສະໂຄດ ສູດນ້ອຍ

[໑໗໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ກູຕາຄາຣະສາລາ ປ່າມະຫາວັນ ເຂດນະຄອນເວສາລີ ສະໄໝນັ້ນແລ ປະຣິພາຊົກຊື່ວັດສະໂຄດອາໄສຢູ່ໃນອາຣາມຂອງປະຣິພາຊົກຊື່ເອກບຸນທະຣິກ ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກຖືບາດແລະຈີວອນ ສະເດັດເຂົ້າໄປບິນທະບາດໃນກຣຸງເວສາລີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ມີພຣະດໍາຣິວ່າ "ຍັງເຊົ້າເກີນໄປທີ່ຈະ ທ່ຽວບິນທະບາດໃນນະຄອນເວສາລີ ທາງທີ່ດີ ເຮົາຄວນເຂົ້າໄປຫາວັດສະໂຄດປະຣິພາຊົກ ຈົນເຖິງອາຣາມຂອງປະຣິພາຊົກຊື່ເອກບຸນທະຣິກ"

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປຫາວັດສະໂຄດປະຣິພາຊົກ ເຖິງອາຣາມຂອງ ປະຣິພາຊົກຊື່ເອກບຸນທະຣິກ ວັດສະໂຄດປະຣິພາຊົກໄດ້ເຫັນພຣະຜູ້ມີພຣະພາກເຈົ້າສະເດັດມາແຕ່ໄກ ໄດ້ຂາບທູນວ່າ

"ທ່ານຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງສະເດັດເຂົ້າມາເທີ້ນ ຂໍຕ້ອນຮັບສະເດັດຢູ່ດົນ ໆ ພຣະຜູ້ມີພຣະພາກເຈົ້າຈະມີເວລາສະເດັດມາເຖິງທີ່ນີ້ ຂໍເຊີນພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທີ້ນ ອາສະນະ ນີ້ປູລາດໄວ້ແລ້ວ"

ພຣະຜູ້ມີພຣະພາກເຈົ້າໄດ້ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ແມ່ນວັດສະໂຄດ ປະຣິພາຊົກ ກໍເລືອກນັ່ງຢູ່ບ່ອນທີ່ສົມຄວນ໑ທີ່ໃດທີ່ໜຶ່ງເຊິ່ງຕ່ຳກວ່າ ແລ້ວໄດ້ຂາບທູນວ່າ

"ທ່ານຜູ້ຈະເລີນ ຂ້າພະເຈົ້າໄດ້ຟັງມາແນວນີ້ວ່າ "ພຣະສະມະນະໂຄດົມເປັນສັບພັນຍູ ມີປົກກະຕິເຫັນທຳທັງປວງ ຊົງປະຕິຍານຍານທັດສະນະ໑ ແນວຄົບຖ້ວນວ່າ "ເມື່ອເຮົາຍ່າງຢູ່ ຢຸດຢູ່ ຫລັບຢູ່ ແລະ ຕື່ນຢູ່ ຍານທັດສະນະຈະຜາກົດຕໍ່ເນື່ອງຕະຫຼອດໄປ" ທ່ານຜູ້ຈະເລີນ ຊົນທີ່ກ່າວແນວນີ້ວ່າ "ພຣະສະມະນະໂຄດົມເປັນສັບພັນຍູ ມີປົກກະຕິເຫັນທຳ ທັງປວງ ຊົງປະຕິຍານຍານທັດສະນະແນວຄົບຖ້ວນວ່າ "ເມື່ອເຮົາຍ່າງຢູ່ ຢຸດຢູ່ ຫລັບຢູ່ ແລະ ຕື່ນຢູ່ ຍານທັດສະນະຈະຜາກົດຕໍ່ເນື່ອງຕະຫຼອດໄປ" ເປັນຜູ້ກ່າວຕາມ ພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດແລ້ວ ບໍ່ຊື່ວ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳອັນບໍ່ຈິງ ແລະ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນແລ້ວບໍ? ອັນໜຶ່ງ ບໍ່ມີແດ່ຫຼືທີ່ຄຳກ່າວເຊັ່ນນັ້ນແລະຄຳທີ່ກ່າວຕໍ່ ໆ ກັນມາ ຈະເປັນເຫດໃຫ້ຖືກຕຳໜິໄດ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ວັດສະ ຊົນທີ່ກ່າວແນວນີ້ວ່າ "ພຣະສະມະນະໂຄດົມເປັນສັບພັນຍູ" ມີປົກກະຕິເຫັນທຳທັງປວງ ຊົງປະຕິຍານຍານທັດສະນະແນວຄົບຖ້ວນວ່າ "ເມື່ອເຮົາຍ່າງຢູ່ ຢຸດຢູ່ ຫລັບຢູ່ ແລະ ຕື່ນຢູ່ ຍານທັດສະນະຈະຜາກົດຕໍ່ເນື່ອງຕະຫຼອດໄປ" ຍັງກ່າວບໍ່ກົງກັບຄຳທີ່ເຮົາກ່າວແລ້ວ ແລະຊື່ວ່າກ່າວຕູ່ເຮົາດ້ວຍຄຳທີ່ບໍ່ເປັນຈິງ ບໍ່ມີຈິງ"

## ວິດຊາ ໓

[໑໘໓] ວັດສະໂຄດປະຣິພາຊົກທູນຖາມວ່າ "ທ່ານຜູ້ຈະເລີນ ຂ້າພຣະອົງທັງຫລາຍ ຈະອະທິບາຍແນວໃດ ຈຶ່ງຈະຊື່ວ່າເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳຕົວະ ແລະ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນແລ້ວບໍ ອັນໜຶ່ງ ບໍ່ມີແດ່ຫຼືທີ່ຄຳກ່າວເຊັ່ນນັ້ນແລະຄຳທີ່ກ່າວຕໍ່ ໆ ກັນມາຈະເປັນເຫດໃຫ້ຖືກຕຳໜິໄດ້"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ວັດສະ ບຸກຄົນຜູ້ອະທິບາຍວ່າ "ພຣະສະມະນະໂຄດົມເປັນ ຜູ້ມີວິດຊາ ໓" ຊື່ວ່າເປັນຜູ້ເວົ້າກົງຕາມທີ່ເຮົາກ່າວໄວ້ ບໍ່ຊື່ວ່າກ່າວຕູ່ເຮົາດ້ວຍຄຳຕົວະ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນ ອັນໜຶ່ງ ບໍ່ມີເລີຍທີ່ຄຳກ່າວເຊັ່ນນັ້ນແລະຄຳທີ່ກ່າວຕໍ່ ໆ ກັນມາຈະເປັນເຫດໃຫ້ຖືກຕຳໜິໄດ້

ເມື່ອໃດກໍຕາມທີ່ເຮົາຕ້ອງການຈະຮູ້ ເຮົາຍ່ອມຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດ ແດ່ ໔ ຊາດແດ່ ໗ລ໗໑ ເຮົາຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດແນວນີ້

ເຮົາພຽງຕ້ອງການຈະຮູ້ທີ່ນັ້ນ ເຮົາກໍເຫັນໝູ່ສັດທີ່ກໍາລັງຈຸຕິ ກໍາລັງເກີດ ທັງຊັ້ນຕໍ່າແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຯລຯ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກໍາ ແນວນີ້ແລ

ເຮົາເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ວັດສະ ບຸກຄົນຜູ້ອະທິບາຍວ່າ "ພຣະສະມະນະໂຄດົມເປັນຜູ້ມີວິດຊາ ໓" ຊື່ວ່າເປັນຜູ້ເວົ້າກົງຕາມທີ່ເຮົາກ່າວໄວ້ ບໍ່ຊື່ວ່າກ່າວຕູ່ເຮົາດ້ວຍຄໍາຕົວະ ແລະ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນ ອັນໜຶ່ງ ບໍ່ມີເລີຍທີ່ຄໍາກ່າວເຊັ່ນນັ້ນ ແລະ ຄໍາທີ່ກ່າວຕໍ່ ໆ ກັນມາ ຈະເປັນເຫດໃຫ້ຖືກຕໍາໜິໄດ້"

## ລັດທິເດຍຣະຖີວ່າງຈາກຄຸນຄວາມດີ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ວັດສະໂຄດປະຣິພາຊົກໄດ້ທູນຖາມພຣະຜູ້ມີພຣະພາກວ່າ "ຂ້າແດ່ ທ່ານພຣະໂຄດົມ ຄະຫຼືຫັດລາງຄົນ ຜູ້ຍັງລະສັງໂຍດຂອງຄະຫຼືຫັດ ບໍ່ໄດ້ ຫລັງຈາກຕາຍແລ້ວເຮັດທີ່ສຸດແຫ່ງທຸກໄດ້ ມີຢູ່ບໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ວັດສະ ຄະຫຼືຫັດທີ່ຍັງລະສັງໂຍດຂອງຄະຫຼືຫັດບໍ່ໄດ້ ຫລັງຈາກຕາຍແລ້ວຍ່ອມເຮັດທີ່ສຸດແຫ່ງທຸກໄດ້ ບໍ່ມີເລີຍ"

"ຄະຫຼືຫັດລາງຄົນຍັງລະສັງໂຍດຂອງຄະຫຼືຫັດບໍ່ໄດ້ ຫລັງຈາກຕາຍແລ້ວໄປເກີດໃນສະຫວັນມີຢູ່ບໍ ທ່ານພຣະໂຄດົມ"

"ຄະຫຼືຫັດຜູ້ຍັງລະສັງໂຍດຂອງຄະຫຼືຫັດບໍ່ໄດ້ ຫລັງຈາກຕາຍແລ້ວ ຈະໄປເກີດໃນສະຫວັນນັ້ນ ບໍ່ແມ່ນມີພຽງ ໑໐໐ ຄົນ ໒໐໐ ຄົນ ໓໐໐ ຄົນ ໔໐໐ ຄົນ ຫຼື ໕໐໐ ຄົນທີ່ນັ້ນ ຄວາມຈິງແລ້ວມີຢູ່ຈໍານວນຫຼາຍນັບບໍ່ຖວນ"

"ອາຊີວົກລາງຄົນຫລັງຈາກຕາຍແລ້ວ ຈະເຮັດທີ່ສຸດແຫ່ງທຸກໄດ້ມີຢູ່ບໍ ທ່ານພຣະໂຄດົມ"
"ອາຊີວົກລາງຄົນ ຫລັງຈາກຕາຍແລ້ວຈະເຮັດທີ່ສຸດແຫ່ງທຸກໄດ້ ບໍ່ມີເລີຍ"
"ອາຊີວົກລາງຄົນຫລັງຈາກຕາຍແລ້ວ ຈະໄປເກີດໃນສະຫວັນມີຢູ່ບໍ ທ່ານພຣະໂຄດົມ"

"ຈາກພັດທະກັບນີ້ໄປ ໙໑ ກັບທີ່ເຮົາຣະນຶກໄດ້ ເຮົາບໍ່ຮູ້ຈັກອາຊີວົກຄົນອື່ນຜູ້ໄປເກີດໃນສະຫວັນ ນອກຈາກອາຊີວົກພຽງຄົນດຽວຜູ້ເປັນກໍາມະວາທີ ເປັນກິຣິຍະວາທີ"

"ທ່ານພຣະໂຄດົມ ເມື່ອເປັນແນວນີ້ ລັດທິເດຍຣະຖີກໍເປັນລັດທິທີ່ວ່າງເປົ່າຈາກຄຸນຄວາມ

ດີ ໂດຍທີ່ສຸດແມ່ນແຕ່ຄຸນຄວາມດີທີ່ຈະໃຫ້ໄປເກີດໃນສະຫວັນ"

"ເປັນແນວນັ້ນ ວັດສະ ເມື່ອເປັນແນວນີ້ ລັດທິເດຍຣະຖີນັ້ນເປັນລັດທິທີ່ວ່າງເປົ່າຈາກຄຸນຄວາມດີ ໂດຍທີ່ສຸດແມ່ນແຕ່ຄຸນຄວາມດີທີ່ຈະໃຫ້ໄປເກີດໃນສະຫວັນ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ວັດສະໂຄດປະຣິພາຊົກມີໃຈຍິນດີຊົມຊື່ນພຣະພາສິດ ຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ຈູລະວັດສະໂຄດຕະສູດທີ່ ໑ ຈົບ**

# ໘. ອັກຄິວັດສະໂຄດຕະສູດ

## ວ່າດ້ວຍຊົງສະແດງເລື່ອງໄຟແກ່ປະຣິພາຊົກຊື່ວັດສະໂຄດ

## ທິດຖິ ໑໐ ປະການ

[໑໘໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ປະຣິພາຊົກຊື່ວັດສະໂຄດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ທ່ານພຣະໂຄດົມທ່ານ ພຣະໂຄດົມຊົງມີທິດຖິແນວນີ້ວ່າ "ໂລກທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ແມ່ນບໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ວັດສະ ເຮົາບໍ່ມີທິດຖິແນວນັ້ນວ່າ "ໂລກທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

"ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ໂລກບໍ່ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ບໍ?"

"ເຮົາບໍ່ມີທິດຖິແນວນັ້ນວ່າ "ໂລກບໍ່ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

"ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ໂລກມີທີ່ສຸດ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ບໍ?"

"ເຮົາບໍ່ມີທິດຖິແນວນັ້ນວ່າ "ໂລກມີທີ່ສຸດ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

"ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ໂລກບໍ່ມີທີ່ສຸດ ນີ້ທີ່ນັ້ນຈິງ ແນວອື່ນ ບໍ່ຈິງ" ບໍ?"

"ເຮົາບໍ່ມີທິດຖິແນວນັ້ນວ່າ "ໂລກບໍ່ມີທີ່ສຸດ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

"ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ຊີວະກັບສະຣີຣະເປັນແນວດຽວກັນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ບໍ?"

"ເຮົາບໍ່ມີທິດຖິແນວນັ້ນວ່າ "ຊີວະກັບສະຣີຣະເປັນແນວດຽວກັນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

"ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ຊີວະກັບສະຣີຣະເປັນຄົນລະແນວກັນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ບໍ?"

"ເຮົາບໍ່ມີທິດຖິແນວນັ້ນວ່າ "ຊີວະກັບສະຣີຣະເປັນຄົນລະແນວກັນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

"ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ຫລັງຈາກຕາຍແລ້ວຕະຖາຄົດ໑ເກີດອີກ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ແມ່ນບໍ?"

"ເຮົາບໍ່ມີທິດຖິແນວນັ້ນວ່າ "ຫລັງຈາກຕາຍແລ້ວຕະຖາຄົດເກີດອີກ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

"ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ຫລັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ແມ່ນບໍ?"

"ເຮົາບໍ່ມີທິດຖິແນວນັ້ນວ່າ "ຫລັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

"ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ຫລັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ໔ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ແມ່ນບໍ?"

"ເຮົາບໍ່ມີທິດຖິແນວນັ້ນວ່າ "ຫລັງຈາກຕາຍແລ້ວຕະຖາຄົດເກີດອີກ ແລະບໍ່ເກີດອີກ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

"ຂ້າແດ່ ທ່ານພຣະໂຄດົມ ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ໕ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ແມ່ນບໍ?"

"ວັດສະ ເຮົາບໍ່ມີທິດຖິແນວນັ້ນວ່າ "ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່

ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ທີ່ນັ້ນຈິງ" ແນວອື່ນບໍ່ຈິງ"

[໑໘໘] ວັດສະໂຄດປະຣິພາຊົກທູນຖາມວ່າ "ເມື່ອຂ້າພຣະອົງທູນຖາມດັ່ງນີ້ວ່າ "ຂ້າແດ່ທ່ານພຣະໂຄດົມ ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ໂລກທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນ ບໍ່ຈິງ" ແມ່ນບໍ?" ພຣະອົງກໍຕັດຕອບວ່າ "ວັດສະ ເຮົາບໍ່ມີທິດຖິແນວນັ້ນວ່າ "ໂລກທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

ເມື່ອຂ້າພຣະອົງທູນຖາມດັ່ງນີ້ວ່າ "ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ໂລກບໍ່ທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ບໍ?" ພຣະອົງກໍຕັດຕອບວ່າ "ເຮົາບໍ່ມີທິດຖິແນວນັ້ນວ່າ "ໂລກບໍ່ທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

ເມື່ອຂ້າພຣະອົງທູນຖາມດັ່ງນີ້ວ່າ "ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ໂລກມີທີ່ສຸດນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ບໍ" ພຣະອົງກໍຕັດຕອບວ່າ "ເຮົາບໍ່ມີທິດຖິແນວນັ້ນວ່າ "ໂລກມີທີ່ສຸດ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

ເມື່ອຂ້າພຣະອົງທູນຖາມດັ່ງນີ້ວ່າ "ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ໂລກບໍ່ມີ ທີ່ສຸດ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ບໍ?" ພຣະອົງກໍຕັດຕອບວ່າ "ເຮົາບໍ່ມີທິດຖິ ແນວນັ້ນວ່າ "ໂລກບໍ່ມີທີ່ສຸດ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

ເມື່ອຂ້າພຣະອົງທູນຖາມດັ່ງນີ້ວ່າ "ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ຊີວະກັບສະຣີຣະເປັນແນວດຽວກັນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ບໍ?" ພຣະອົງກໍຕັດຕອບວ່າ "ເຮົາບໍ່ມີທິດຖິແນວນັ້ນວ່າ "ຊີວະກັບສະຣີຣະເປັນແນວດຽວກັນ ນີ້ທີ່ນັ້ນຈິງ ແນວອື່ນ ບໍ່ຈິງ"

ເມື່ອຂ້າພຣະອົງທູນຖາມດັ່ງນີ້ວ່າ "ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ຊີວະກັບສະຣີຣະເປັນຄົນລະແນວກັນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ບໍ?" ພຣະອົງກໍຕັດຕອບວ່າ "ເຮົາບໍ່ມີທິດຖິແນວນັ້ນວ່າ "ຊີວະກັບສະຣີຣະເປັນຄົນລະແນວກັນ ນີ້ທີ່ນັ້ນຈິງ ແນວອື່ນ ບໍ່ຈິງ"

ເມື່ອຂ້າພຣະອົງທູນຖາມດັ່ງນີ້ວ່າ "ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ຫລັງຈາກຕາຍແລ້ວຕະຖາຄົດເກີດອີກ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ບໍ?" ພຣະອົງກໍຕັດຕອບວ່າ "ເຮົາບໍ່ມີທິດຖິແນວນັ້ນວ່າ "ຫລັງຈາກຕາຍແລ້ວຕະຖາຄົດເກີດອີກ ນີ້ທີ່ນັ້ນຈິງ ແນວອື່ນ ບໍ່ຈິງ"

ເມື່ອຂ້າພຣະອົງທູນຖາມດັ່ງນີ້ວ່າ "ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ຫລັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ບໍ?" ພຣະອົງກໍຕັດຕອບວ່າ "ເຮົາບໍ່ມີທິດຖິແນວນັ້ນວ່າ "ຫລັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ນີ້ທີ່ນັ້ນຈິງ ແນວອື່ນ ບໍ່ຈິງ"

ເມື່ອຂ້າພຣະອົງທູນຖາມດັ່ງນີ້ວ່າ "ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ຫລັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ບໍ?" ພຣະອົງກໍຕັດຕອບວ່າ "ເຮົາບໍ່ມີທິດຖິແນວນັ້ນວ່າ "ຫລັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

ເມື່ອຂ້າພຣະອົງທູນຖາມດັ່ງນີ້ວ່າ "ຂ້າແດ່ທ່ານພຣະໂຄດົມ ທ່ານພຣະໂຄດົມຊົງມີທິດຖິແນວນີ້ວ່າ "ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ບໍ" ພຣະອົງກໍຕັດຕອບວ່າ "ວັດສະ ເຮົາບໍ່ມີທິດຖິ ແນວນັ້ນວ່າ "ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ທ່ານພຣະໂຄດົມຊົງເຫັນໂທດອັນໃດຫຼື ຈຶ່ງບໍ່ຊົງຍອມຮັບທິດຖິເຫລົ່ານີ້ ໂດຍປະການທັງປວງ ແນວນີ້"

[໑໘໙] ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ວັດສະ ທິດຖິວ່າ "ໂລກທ່ຽງ" ນັ້ນ ເປັນຮົກຊັດຄືທິດຖິ ເປັນກັນດານຄືທິດຖິ ເປັນສ້ຽນໜາມຄືທິດຖິ ເປັນຄວາມດີ້ນຣົນຄືທິດຖິ ເປັນສັງໂຍດຄືທິດຖິ ກໍ່ໃຫ້ເກີດຄວາມທຸກ໑ ຄວາມລຳບາກ ຄວາມຄັບແຄ້ນ ແລະຄວາມ ຮ້ອນຮົນ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ແລະເພື່ອນິບພານ ທິດຖິວ່າ "ໂລກບໍ່ທ່ຽງ" ฯລฯ "ໂລກມີທີ່ສຸດ" ฯລฯ "ໂລກບໍ່ມີທີ່ສຸດ" ฯລฯ "ຊີວະກັບສະຣີຣະເປັນແນວດຽວກັນ" ฯລฯ "ຊີວະກັບສະຣີຣະເປັນຄົນລະແນວກັນ" ฯລฯ "ຫລັງຈາກຕາຍແລ້ວຕະຖາຄົດເກີດອີກ" ฯລฯ "ຫລັງຈາກຕາຍແລ້ວຕະຖາຄົດ ບໍ່ເກີດອີກ" ฯລฯ "ຫລັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ" ฯລฯ ທິດຖິວ່າ "ຫລັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ນັ້ນ ເປັນຮົກຊັດ ຄືທິດຖິ ເປັນກັນດານຄືທິດຖິ ເປັນສ້ຽນໜາມຄືທິດຖິ ເປັນຄວາມດີ້ນຣົນຄືທິດຖິ ເປັນ ສັງໂຍດຄືທິດຖິ ກໍ່ໃຫ້ເກີດຄວາມທຸກ ຄວາມລຳບາກ ຄວາມຄັບແຄ້ນ ແລະຄວາມ ຮ້ອນຮົນ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ແລະ ເພື່ອນິບພານ

ວັດສະ ເຮົາເຫັນໂທດນີ້ ຈຶ່ງບໍ່ຍອມຮັບທິດຖິເຫຼົ່ານັ້ນໂດຍປະການທັງປວງ ແນວນີ້"

"ທ່ານພຣະໂຄດົມຊົງມີທິດຖິບາງຢ່າງບໍ?"

"ວັດສະ ຄຳວ່າ "ທິດຖິ" ນັ້ນ ຕະຖາຄົດກຳຈັດໄດ້ແລ້ວ ຕະຖາຄົດເຫັນແລ້ວວ່າ "ຮູບເປັນດັ່ງນີ້ ຄວາມເກີດແຫ່ງຮູບເປັນດັ່ງນີ້ ຄວາມດັບແຫ່ງຮູບເປັນດັ່ງນີ້ ເວທະນາເປັນດັ່ງນີ້ ຄວາມເກີດແຫ່ງເວທະນາເປັນດັ່ງນີ້ ຄວາມດັບແຫ່ງເວທະນາເປັນດັ່ງນີ້ ສັນຍາເປັນດັ່ງນີ້ ຄວາມເກີດແຫ່ງສັນຍາເປັນດັ່ງນີ້ ຄວາມດັບແຫ່ງສັນຍາເປັນດັ່ງນີ້ ສັງຂານເປັນດັ່ງນີ້ ຄວາມເກີດແຫ່ງ

ສັງຂານເປັນດັ່ງນີ້ ຄວາມດັບແຫ່ງສັງຂານເປັນດັ່ງນີ້ ວິນຍານເປັນດັ່ງນີ້ ຄວາມເກີດແຫ່ງວິນຍານ ເປັນດັ່ງນີ້ ຄວາມດັບແຫ່ງວິນຍານເປັນດັ່ງນີ້" ຍ້ອນແນວນັ້ນ ເຮົາຈຶ່ງກ່າວວ່າ "ຕະຖາຄົດ ລຸດ ພົ້ນແລ້ວດ້ວຍຄວາມບໍ່ຖືໝັ້ນ ຍ້ອນຄວາມສິ້ນໄປ ຍ້ອນຄວາມຄາຍອອກ ຍ້ອນ ຄວາມດັບ ຍ້ອນ ຄວາມສະລະ ຍ້ອນຄວາມສະລະຄືນ ຍ້ອນຄວາມບໍ່ຖືໝັ້ນ ອະຫັງການ ມະມັງການ ແລະມານາ ນຸໄສ໑ທັງປວງ ທີ່ເຂົ້າໃຈແລ້ວ ຍ່ຳຍີໄດ້ແລ້ວທັງໝົດ"

## ບັນຫາເລື້ອງຄວາມລຸດພົ້ນ

[໑໙໐] ວັດສະໂຄດປະຣິພາຊົກທູນຖາມວ່າ "ຂ້າແດ່ ທ່ານພຣະໂຄດົມ ພິກຂຸຜູ້ມີຈິດລຸດ ພົ້ນແລ້ວແນວນີ້ ຈະເກີດໄປເກີດຢູ່ໃສ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ວັດສະ ຄຳວ່າ "ເກີດ" ນຳມາໃຊ້ບໍ່ໄດ້"

"ຖ້າເຊັ່ນນັ້ນ ພິກຂຸນັ້ນຈະບໍ່ເກີດແມ່ນບໍ່? ທ່ານພຣະໂຄດົມ"

"ຄຳວ່າ "ບໍ່ເກີດ" ນຳມາໃຊ້ບໍ່ໄດ້"

"ຖ້າເຊັ່ນນັ້ນ ພິກຂຸນັ້ນເກີດແລະບໍ່ເກີດແມ່ນບໍ? ທ່ານພຣະໂຄດົມ"

"ຄຳວ່າ "ເກີດແລະບໍ່ເກີດ" ນຳມາໃຊ້ບໍ່ໄດ້"

"ຖ້າເຊັ່ນນັ້ນ ພິກຂຸນັ້ນຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ແມ່ນບໍ? ທ່ານ ພຣະໂຄດົມ"

"ຄຳວ່າ "ຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ນຳມາໃຊ້ບໍ່ໄດ້"

"ເມື່ອຂ້າພຣະອົງທູນຖາມດັ່ງນີ້ວ່າ "ຂ້າແດ່ ທ່ານພຣະໂຄດົມ ພິກຂຸຜູ້ມີຈິດລຸດພົ້ນແລ້ວ ແນວນີ້ ຈະເກີດໄປເກີດຢູ່ໃສ" ພຣະອົງກໍຕັດຕອບວ່າ "ຄຳວ່າ "ເກີດ" ນຳມາໃຊ້ບໍ່ໄດ້"

ເມື່ອຂ້າພຣະອົງທູນຖາມດັ່ງນີ້ວ່າ "ຖ້າເຊັ່ນນັ້ນ ພິກຂຸນັ້ນຈະບໍ່ເກີດແມ່ນບໍ? ທ່ານພຣະ ໂຄດົມ" ພຣະອົງກໍຕັດຕອບວ່າ "ຄຳວ່າ "ບໍ່ເກີດ" ນຳມາໃຊ້ບໍ່ໄດ້"

ເມື່ອຂ້າພຣະອົງທູນຖາມດັ່ງນີ້ວ່າ "ຖ້າເຊັ່ນນັ້ນ ພິກຂຸນັ້ນເກີດແລະບໍ່ເກີດແມ່ນບໍ? ທ່ານ ພຣະໂຄດົມ" ພຣະອົງກໍຕັດຕອບວ່າ "ຄຳວ່າ "ເກີດແລະບໍ່ເກີດ" ນຳມາໃຊ້ບໍ່ໄດ້"

ເມື່ອຂ້າພຣະອົງທູນຖາມດັ່ງນີ້ວ່າ "ຖ້າເຊັ່ນນັ້ນ ພິກຂຸນັ້ນຈະວ່າເກີດອີກກໍບໍ່ແມ່ນ ຈະວ່າ ບໍ່ເກີດອີກກໍບໍ່ແມ່ນ ແມ່ນບໍ? ທ່ານພຣະໂຄດົມ" ພຣະອົງກໍຕັດຕອບວ່າ "ຄຳວ່າ "ຈະວ່າເກີດອີກ

ກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ນຳມາໃຊ້ບໍ່ໄດ້"

ຂ້າແດ່ ທ່ານພຣະໂຄດົມ ໃນຂໍ້ນີ້ ຂ້າພຣະອົງບໍ່ຮູ້ແລ້ວ ໃນຂໍ້ນີ້ ຂ້າພຣະອົງຫລົງໄປແລ້ວ ຄວາມເຫຼື້ອມໃສເຊິ່ງມີຢູ່ແດ່ຈາກການສົນທະນາປາໄສກັບທ່ານພຣະໂຄດົມໃນຕອນທຳອິດ ບັດນີ້ໄດ້ໝົດສິ້ນຫາຍໄປໝົດແລ້ວ"

"ວັດສະ ຄວນແລ້ວທີ່ທ່ານຈະບໍ່ຮູ້ ຄວນແລ້ວທີ່ທ່ານຈະຫລົງ ຍ້ອນວ່າທຳນີ້ເລິກເຊິ່ງ ເຫັນໄດ້ຍາກ ຮູ້ຕາມໄດ້ຍາກ ສະງົບ ປະນີດ ບໍ່ແມ່ນທຳທີ່ຈະຢັ່ງເຖິງໄດ້ດ້ວຍຄວາມນຶກລະອຽດ ສະເພາະບັນດິດຈຶ່ງຈະຮູ້ໄດ້ ທຳນັ້ນຜູ້ມີຄວາມເຫັນເປັນແນວອື່ນ ມີຄວາມພໍໃຈເປັນແນວອື່ນ ມີຄວາມພຽນໃນທາງອື່ນ ຢູ່ໃນສຳນັກຂອງອາຈານອື່ນ ຮູ້ໄດ້ຍາກ

[໑໙໑] ວັດສະ ຖ້າຈັ່ງຊັ້ນ ເຮົາຈະຍ້ອນຖາມທ່ານໃນຂໍ້ນີ້ ທ່ານເຫັນຄວນແນວໃດ ກໍເພິ່ງຕອບແນວນັ້ນ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຖ້າໄຟລຸກສະຫວ່າງແຈ້ງຢູ່ຕໍ່ໜ້າທ່ານ ທ່ານຮູ້ໄດ້ບໍ່ວ່າ "ໄຟນີ້ກຳລັງລຸກຮຸ່ງຕໍ່ໜ້າເຮົາ"

"ຂ້າແດ່ ທ່ານພຣະໂຄດົມ ຖ້າໄຟລຸກສະຫວ່າງແຈ້ງຕໍ່ໜ້າຂ້າພຣະອົງ ຂ້າພຣະອົງກໍຮູ້ໄດ້ວ່າ "ໄຟນີ້ລຸກຮຸ່ງຢູ່ຕໍ່ໜ້າຂ້າພຣະອົງ"

"ຖ້າໃຜ ໆ ຈະເພິ່ງຖາມທ່ານແນວນີ້ວ່າ "ໄຟທີ່ລຸກຮຸ່ງຢູ່ຕໍ່ໜ້າທ່ານນີ້ ອາໄສອັນໃດ ຈຶ່ງລຸກຮຸ່ງ" ທ່ານຖືກຖາມແນວນີ້ແລ້ວ ຈະເພິ່ງຕອບແນວໃດ"

"ຖ້າໃຜ ໆ ຖາມຂ້າພຣະອົງແນວນີ້ວ່າ "ໄຟທີ່ລຸກຮຸ່ງຢູ່ຕໍ່ໜ້າທ່ານນີ້ ອາໄສອັນໃດ ຈຶ່ງລຸກຮຸ່ງ" ຂ້າພຣະອົງຖືກຖາມແນວນີ້ແລ້ວ ກໍຈະຕອບແນວນີ້ວ່າ "ໄຟທີ່ລຸກຮຸ່ງຢູ່ ຕໍ່ໜ້າຂ້າພຣະອົງນີ້ອາໄສເຊື້ອຄືຫຍ້າແລະໄມ້ຈຶ່ງລຸກຮຸ່ງ ທ່ານພຣະໂຄດົມ"

"ຖ້າໄຟນັ້ນຈະເພິ່ງດັບໄປຕໍ່ໜ້າທ່ານ ທ່ານຮູ້ໄດ້ບໍ່ວ່າ "ໄຟນີ້ດັບໄປຕໍ່ໜ້າທ່ານແລ້ວ"

"ຖ້າໄຟນັ້ນຈະເພິ່ງດັບໄປຕໍ່ໜ້າຂ້າພຣະອົງ ຂ້າພຣະອົງກໍຮູ້ໄດ້ວ່າ "ໄຟນີ້ດັບໄປຕໍ່ໜ້າຂ້າພຣະອົງແລ້ວ ທ່ານພຣະໂຄດົມ"

"ວັດສະ ຖ້າໃຜ ໆ ຈະເພິ່ງຖາມທ່ານວ່າ "ໄຟທີ່ດັບໄປແລ້ວຕໍ່ໜ້າທ່ານນັ້ນ ດັບຈາກທິດນີ້ແລ້ວໄປສູ່ທິດໃດ ຄື ທິດຕາເວັນອອກ ທິດຕາເວັນຕົກ ທິດໃຕ້ ຫຼື ທິດເໜືອ" ທ່ານຖືກຖາມແນວນີ້ແລ້ວຈະເພິ່ງຕອບແນວໃດ?"

"ຂ້າແດ່ ທ່ານພຣະໂຄດົມ ບໍ່ຄວນຖາມເຊັ່ນນັ້ນ ຍ້ອນໄຟອາໄສເຊື້ອຄືຫຍ້າແລະໄມ້ຈຶ່ງລຸກຮຸ່ງ ແຕ່ຍ້ອນເຊື້ອນັ້ນຖືກໄຟເຜົາມອດໄໝ້ ແລະ ຍ້ອນບໍ່ມີຂອງອື່ນເປັນເຊື້ອ ໄຟນັ້ນຈຶ່ງນັບ

ໄດ້ວ່າບໍ່ມີເຊື້ອ ດັບສະນິດແລ້ວ"

[໑໙໘] "ວັດສະ ແນວນັ້ນຄືກັນ ບຸກຄົນເມື່ອບັນຍັດຕະຖາຄົດ ເພິ່ງບັນຍັດດ້ວຍຮູບໃດ ຮູບນັ້ນຕະຖາຄົດລະໄດ້ແລ້ວ ຕັດຮາກຖອນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກຖອນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຕະຖາຄົດພົ້ນແລ້ວຈາກການຮຽກວ່າຮູບ ມີຄຸນອັນເລີກລໍ້າ ອັນໃຜ ໆ ປະມານບໍ່ໄດ້ ຢັ່ງເຖິງໄດ້ຍາກ ປຽບຄືມະຫາສະມຸດ ຄຳວ່າ "ເກີດ" ນຳມາໃຊ້ບໍ່ໄດ້ ຄຳວ່າ "ບໍ່ເກີດ" ນຳມາໃຊ້ບໍ່ໄດ້ ຄຳວ່າ "ເກີດ ແລະ ບໍ່ເກີດ" ນຳມາໃຊ້ບໍ່ໄດ້ ຄຳວ່າ "ຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ກໍນຳມາ ໃຊ້ບໍ່ໄດ້

ບຸກຄົນເມື່ອບັນຍັດຕະຖາຄົດ ເພິ່ງບັນຍັດດ້ວຍເວທະນາໃດ ເວທະນານັ້ນ ຕະຖາຄົດລະໄດ້ແລ້ວ ຕັດຮາກຖອນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກຖອນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຕະຖາຄົດພົ້ນແລ້ວຈາກການຮຽກວ່າເວທະນາ ມີຄຸນອັນເລີກລໍ້າ ອັນໃຜ ໆ ປະມານບໍ່ໄດ້ ຢັ່ງເຖິງໄດ້ຍາກ ປຽບຄືມະຫາສະມຸດ ຄຳວ່າ "ເກີດ" ນຳມາໃຊ້ບໍ່ໄດ້ ຄຳວ່າ "ບໍ່ເກີດ" ນຳມາໃຊ້ບໍ່ໄດ້ ຄຳວ່າ "ເກີດແລະບໍ່ເກີດ" ນຳມາໃຊ້ ບໍ່ໄດ້ ຄຳວ່າ "ຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ກໍນຳມາໃຊ້ບໍ່ໄດ້

ບຸກຄົນເມື່ອບັນຍັດຕະຖາຄົດ ເພິ່ງບັນຍັດດ້ວຍສັນຍາໃດ ສັນຍານັ້ນ ຕະຖາຄົດ ລະໄດ້ແລ້ວ ຕັດຮາກຖອນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກຖອນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຕະຖາຄົດພົ້ນແລ້ວຈາກການຮຽກວ່າສັນຍາ ມີຄຸນອັນ ເລີກລໍ້າອັນໃຜ ໆ ປະມານບໍ່ໄດ້ ຢັ່ງເຖິງໄດ້ຍາກ ປຽບຄືມະຫາສະມຸດ ຄຳວ່າ "ເກີດ" ນຳມາໃຊ້ບໍ່ໄດ້ ຄຳວ່າ "ບໍ່ເກີດ" ນຳມາໃຊ້ບໍ່ໄດ້ ຄຳວ່າ "ເກີດແລະບໍ່ເກີດ" ນຳມາໃຊ້ ບໍ່ໄດ້ ຄຳວ່າ "ຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ກໍນຳມາໃຊ້ບໍ່ໄດ້

ບຸກຄົນເມື່ອບັນຍັດຕະຖາຄົດ ເພິ່ງບັນຍັດດ້ວຍສັງຂານໃດ ສັງຂານນັ້ນ ຕະຖາຄົດລະໄດ້ແລ້ວ ຕັດຮາກຖອນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກຖອນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຕະຖາຄົດພົ້ນແລ້ວຈາກການຮຽກວ່າສັງຂານ ມີຄຸນອັນເລີກລໍ້າ ອັນໃຜ ໆ ປະມານບໍ່ໄດ້ ຢັ່ງເຖິງໄດ້ຍາກ ປຽບຄືມະຫາສະມຸດ ຄຳວ່າ "ເກີດ" ນຳມາໃຊ້ບໍ່ໄດ້ ຄຳວ່າ "ບໍ່ເກີດ" ນຳມາໃຊ້ບໍ່ໄດ້ ຄຳວ່າ "ເກີດແລະບໍ່ເກີດ" ນຳມາໃຊ້ບໍ່ໄດ້ ຄຳວ່າ "ຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ກໍນຳມາໃຊ້ບໍ່ໄດ້

ບຸກຄົນເມື່ອບັນຍັດຕະຖາຄົດ ເພິ່ງບັນຍັດດ້ວຍວິນຍານໃດ ວິນຍານນັ້ນ ຕະຖາຄົດລະໄດ້ແລ້ວ ຕັດຮາກຖອນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກຖອນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຕະຖາຄົດພົ້ນແລ້ວຈາກການຮຽກວ່າວິນຍານ ມີຄຸນອັນເລີກລໍ້າ ອັນໃຜ ໆ ປະມານບໍ່ໄດ້ ຢັ່ງເຖິງໄດ້ຍາກ ປຽບຄືມະຫາສະມຸດ ຄຳວ່າ "ເກີດ" ນຳມາໃຊ້ບໍ່ໄດ້ ຄຳ

ວ່າ "ບໍ່ເກີດ" ນຳມາໃຊ້ບໍ່ໄດ້ ຄຳວ່າ "ເກີດແລະບໍ່ເກີດ" ນຳມາໃຊ້ບໍ່ໄດ້ ຄຳວ່າ "ຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ" ກໍນຳມາໃຊ້ບໍ່ໄດ້"

### ວັດສະໂຄດປະຣິພາຊົກເຖິງພຣະຣັດຕະນະໄຕຣເປັນສະຣະນະ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ວັດສະໂຄດປະຣິພາຊົກໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ທ່ານພຣະໂຄດົມ ຕົ້ນສາລະໃຫຍ່ ໃນບ່ອນໃກ້ເຮືອນຫຼືນິຄົມ ງ່າ ໃບ ເປືອກ ເກັດ ແລະ ມອກ ຂອງຕົ້ນສາລະໃຫຍ່ນັ້ນ ຈະລຸດ ຣ່ວງ ກະເທາະໄປ ຍ້ອນເປັນຂອງບໍ່ທ່ຽງ ສະໄໝຕໍ່ມາ ຕົ້ນສາລະໃຫຍ່ນັ້ນ ກໍຂາດງ່າ ໃບ ເປືອກ ເກັດ ແລະ ມອກ ຄົງຢູ່ ແຕ່ແກ່ນລ້ວນ ໆ ແມ່ນສັນໃດ ປາພົດຂອງທ່ານພຣະໂຄດົມກໍສັນນັ້ນຄືກັນ ປາສະຈາກ ງ່າ ໃບ ເປືອກ ເກັດ ແລະມອກ ຄົງຢູ່ແຕ່ຄຳອັນເປັນແກ່ນລ້ວນ ໆ

ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫລົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" ດັ່ງນີ້ແລ

**ອັກຄິວັດສະໂຄດຕະສູດທີ່ ໘ ຈົບ**

## ໙. ມະຫາວັດສະໂຄດຕະສູດ

### ວ່າດ້ວຍປະຣິພາຊົກຊື່ວັດສະໂຄດ ສູດໃຫຍ່

### ເລື້ອງກຸສົນທຳແລະອະກຸສົນທຳ

[໑໘໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ຄັ້ງນັ້ນແລ ປະຣິພາຊົກຊື່ວັດສະໂຄດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ

ຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າພຣະອົງເຄີຍສົນທະນາກັບທ່ານພຣະໂຄດົມເປັນເວລາດົນມາແລ້ວ ຂໍປະທານອະໂຣກາດ ຂໍທ່ານພຣະໂຄດົມໂຜດສະແດງທຳທັງທີ່ເປັນກຸສົນ ແລະ ເປັນອະກຸສົນແກ່ຂ້າພຣະອົງໂດຍຫຍໍ້ເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ວັດສະ ເຮົາຈະສະແດງທຳທັງທີ່ເປັນກຸສົນ ແລະເປັນອະກຸສົນແກ່ທ່ານໂດຍຫຍໍ້ກໍໄດ້ ເຮົາຈະສະແດງທຳທັງທີ່ເປັນກຸສົນ ແລະ ເປັນອະກຸສົນແກ່ທ່ານໂດຍພິດສະດານກໍໄດ້ ແຕ່ເຮົາຈັກສະແດງທຳທັງທີ່ເປັນກຸສົນ ແລະ ເປັນອະກຸສົນແກ່ທ່ານໂດຍຫຍໍ້ ທ່ານຈົ່ງຟັງ ຈົ່ງໃສ່ໃຈ ໃຫ້ດີ ເຮົາຈັກກ່າວ"

ວັດສະໂຄດປະຣິພາຊົກ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເລື້ອງນີ້ ວ່າ

[໑໘໔] "ວັດສະ ໂລພະເປັນອະກຸສົນ ອະໂລພະເປັນກຸສົນ ໂທສະເປັນອະກຸສົນ ອະໂທສະເປັນກຸສົນ ໂມຫະເປັນອະກຸສົນ ອະໂມຫະເປັນກຸສົນ ລວມຄວາມວ່າ ທຳທີ່ເປັນອະກຸສົນມີ ໓ ປະການ ທຳທີ່ເປັນກຸສົນມີ ໓ ປະການ

ປານາຕິບາດ (ການຂ້າສັດ) ເປັນອະກຸສົນ ປານາຕິປາຕາ ເວຣະມະນີ(ການງົດເວັ້ນຈາກການຂ້າສັດ) ເປັນກຸສົນ

ອະທິນນາທານ (ການລັກຊັບ) ເປັນອະກຸສົນ ອະທິນນາທານາ ເວຣະມະນີ (ການງົດເວັ້ນຈາກການລັກຊັບ) ເປັນກຸສົນ

ກາເມສຸມິຈສາຈານ (ການປະພຶດຜິດໃນກາມ) ເປັນອະກຸສົນ ກາເມສຸມິດສາຈາຣາເວຣະມະນີ (ການງົດເວັ້ນຈາກການປະພຶດຜິດໃນກາມ) ເປັນກຸສົນ

ມຸສາວາທະ (ການເວົ້າຕົວະ) ເປັນອະກຸສົນ ມຸສາວາທາ ເວຣະມະນີ (ການງົດເວັ້ນຈາກການເວົ້າຕົວະ) ເປັນກຸສົນ

ປິສຸນາວາຈາ (ການເວົ້າສັບສໍ່) ເປັນອະກຸສົນ ປິສຸນາຍ ວາຈາຍ ເວຣະມະນີ (ການງົດເວັ້ນຈາກການເວົ້າສັບສໍ່) ເປັນກຸສົນ

ຜະຣຸສະວາຈາ (ການເວົ້າຄຳຫຍາບ) ເປັນອະກຸສົນ ຜະຣຸສາຍ ວາຈາຍ ເວຣະມະນີ (ການງົດເວັ້ນຈາກການເວົ້າຄຳຫຍາບ) ເປັນກຸສົນ

ສຳຜັບປະລາປະ (ການເວົ້າບໍ່ມີສາຣະ) ເປັນອະກຸສົນ ສຳຜັປປະລາປາ ເວຣະມະນີ (ການງົດເວັ້ນຈາກການເວົ້າບໍ່ມີສາຣະ) ເປັນກຸສົນ

ອະພິດຊາ (ຄວາມເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ) ເປັນອະກຸສົນ ອະນະພິດຊາ (ຄວາມບໍ່ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ) ເປັນກຸສົນ

ພະຍາບາດ (ຄວາມຄິດຮ້າຍ) ເປັນອະກຸສົນ ອະພະຍາບາດ (ຄວາມບໍ່ຄິດຮ້າຍ) ເປັນກຸສົນ

ມິດສາທິດຖິ (ຄວາມເຫັນຜິດ) ເປັນອະກຸສົນ ສຳມາທິດຖິ (ຄວາມເຫັນຖືກ) ເປັນກຸສົນ

ລວມຄວາມວ່າ ທຳທີ່ເປັນອະກຸສົນມີ ໑໐ ປະການ ທຳທີ່ເປັນກຸສົນມີ ໑໐ ປະການ

ວັດສະ ຍ້ອນພິກຂຸລະຕັນຫາໄດ້ແລ້ວ ຕັດຮາກຖອນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກຖອນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຈຶ່ງເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດ໑ສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນ ໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງ"

## ພຸດທະບໍລິສັດຜູ້ເຮັດໃຫ້ແຈ້ງວິມຸດຕິ

[໑໘໕] ວັດສະໂຄດປະຣິພາຊົກທູນຖາມວ່າ "ຍົກເວັ້ນທ່ານພຣະໂຄດົມ ພິກຂຸແມ່ນຮູບໜຶ່ງຜູ້ເປັນສາວົກຂອງທ່ານພຣະໂຄດົມ ຜູ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ມີຢູ່ບໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ວັດສະ ພິກຂຸທັງຫລາຍຜູ້ເປັນສາວົກຂອງເຮົາ ຜູ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ບໍ່ແມ່ນມີພຽງ ໑໐໐ ຮູບ ໒໐໐ ຮູບ ໓໐໐ ຮູບ ໔໐໐ ຮູບ ໕໐໐ ອີງ ຄວາມຈິງແລ້ວມີຢູ່ຈຳນວນຫຼາຍຢ່າງແນ່ນອນ"

"ຍົກເວັ້ນທ່ານພຣະໂຄດົມ ຍົກເວັ້ນພິກຂຸ ພິກຂຸນີແມ່ນຮູບໜຶ່ງຜູ້ເປັນສາວິກາຂອງທ່ານພຣະໂຄດົມ ຜູ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ມີຢູ່ບໍ?"

"ພິກຂຸນີທັງຫລາຍ ຜູ້ເປັນສາວິກາຂອງເຮົາ ຜູ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ບໍ່ແມ່ນ ມີພຽງ ໑໐໐ ຮູບ ໒໐໐ ຮູບ ໓໐໐ ຮູບ ໔໐໐ ຮູບ ໕໐໐ ອີງ ຄວາມຈິງແລ້ວມີຢູ່ຈຳນວນຫຼາຍຢ່າງ

ແນ່ນອນ"

"ຍົກເວັ້ນທ່ານພຣະໂຄດົມ ຍົກເວັ້ນພິກຂຸທັງຫລາຍ ຍົກເວັ້ນພິກຂຸນີທັງຫລາຍ ອຸປາສົກ ແມ່ນຄົນໜຶ່ງຜູ້ເປັນສາວົກຂອງທ່ານພຣະໂຄດົມ ຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ເປັນເພື່ອນພົມມະຈາຣີ ເປັນໂອປະປາຕິກະ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ ຈະປະຣິນິບພານໃນພົບນັ້ນ ບໍ່ກັບມາຈາກໂລກນັ້ນອີກ ມີຢູ່ບໍ?"

"ອຸປາສົກທັງຫລາຍຜູ້ເປັນສາວົກຂອງເຮົາ ຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ເປັນເພື່ອນພົມມະຈາຣີ ເປັນໂອປະປາຕິກະ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ ຈະປະຣິນິບພານໃນພົບນັ້ນ ບໍ່ກັບມາຈາກໂລກນັ້ນອີກ ບໍ່ແມ່ນມີພຽງ ໑໐໐ ຄົນ ໒໐໐ ຄົນ ໓໐໐ ຄົນ ໔໐໐ ຄົນ ໕໐໐ ຄົນ ຄວາມຈິງແລ້ວມີຢູ່ຈຳນວນຫຼາຍຢ່າງແນ່ນອນ"

"ຍົກເວັ້ນທ່ານພຣະໂຄດົມ ຍົກເວັ້ນພິກຂຸທັງຫລາຍ ຍົກເວັ້ນພິກຂຸນີທັງຫລາຍ ຍົກເວັ້ນອຸປາສົກທັງຫລາຍຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ເປັນເພື່ອນພົມມະຈາຣີ ອຸປາສົກແມ່ນຄົນໜຶ່ງ ຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ບໍຣິໂພກກາມ ເຮັດຕາມຄຳສັ່ງສອນ ເຮັດຖືກຕາມໂອ ວາດ ໝົດຄວາມສົງໄສ ບໍ່ມີຄຳຖາມໃດ ໆ ມີຄວາມແກ່ກ້າ ບໍ່ຕ້ອງເຊື່ອໃຜອີກໃນຫລັກຄຳສອນຂອງພຣະສາດສະດາ ມີຢູ່ບໍ?"

"ອຸປາສົກທັງຫລາຍຜູ້ເປັນສາວົກຂອງເຮົາ ຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ບໍຣິໂພກກາມ ເຮັດຕາມຄຳສັ່ງສອນ ເຮັດຖືກຕາມໂອວາດ ໝົດຄວາມສົງໄສ ບໍ່ມີຄຳຖາມໃດ ໆ ມີຄວາມແກ່ກ້າ ບໍ່ຕ້ອງເຊື່ອໃຜອີກ ໃນຫລັກຄຳສອນຂອງພຣະສາດສະດາ ບໍ່ແມ່ນມີພຽງ ໑໐໐ ຄົນ ໒໐໐ ຄົນ ໓໐໐ ຄົນ ໔໐໐ ຄົນ ໕໐໐ ຄົນ ຄວາມຈິງແລ້ວມີຢູ່ຈຳນວນຫຼາຍຢ່າງແນ່ນອນ"

"ຍົກເວັ້ນທ່ານພຣະໂຄດົມ ຍົກເວັ້ນພິກຂຸທັງຫລາຍ ຍົກເວັ້ນພິກຂຸນີທັງຫລາຍ ຍົກເວັ້ນອຸປາສົກທັງຫລາຍຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ເປັນເພື່ອນພົມມະຈາຣີ ຍົກເວັ້ນອຸປາສົກທັງຫລາຍຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ບໍຣິໂພກກາມ ອຸປາສິກາແມ່ນຄົນໜຶ່ງຜູ້ເປັນສາວິກາຂອງທ່ານພຣະໂຄດົມ ຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ເປັນເພື່ອນພົມຈາຣິນີ ເປັນໂອປະປາຕິກະ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ ຈະປະຣິນິບພານໃນພົບນັ້ນ ບໍ່ກັບມາຈາກໂລກນັ້ນອີກ ມີຢູ່ບໍ?"

"ອຸປາສິກາທັງຫລາຍຜູ້ເປັນສາວິກາຂອງເຮົາ ຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ເປັນເພື່ອນພົມຈາຣິນີ ເປັນໂອປະປາຕິກະ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ ຈະປະຣິນິບພານໃນພົບນັ້ນ ບໍ່ກັບມາຈາກໂລກນັ້ນອີກ ບໍ່ແມ່ນມີພຽງ ໑໐໐ ຄົນ ໒໐໐ ຄົນ ໓໐໐ ຄົນ ໔໐໐ ຄົນ ໕໐໐ ຄົນ ຄວາມຈິງແລ້ວມີຢູ່ຈຳນວນຫຼາຍຢ່າງແນ່ນອນ"

"ຍົກເວັ້ນທ່ານພຣະໂຄດົມ ຍົກເວັ້ນພິກຂຸທັງຫລາຍ ຍົກເວັ້ນພິກຂຸນີທັງຫລາຍ ຍົກເວັ້ນອຸປາສົກທັງຫລາຍຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ເປັນເພື່ອນພົມມະຈາຣີ ຍົກເວັ້ນອຸປາສົກທັງຫລາຍຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ບໍຣິໂພກການ ຍົກເວັ້ນພວກອຸປາສິກາຜູ້ເປັນ ຄະຫຼືຫັດ ນຸ່ງຂາວຫົ່ມຂາວ ເປັນເພື່ອນພົມຈາຣິນີ ອຸປາສິກາແມ່ນຄົນໜຶ່ງຜູ້ເປັນສາວິກາ ຂອງທ່ານພຣະໂຄດົມຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ບໍຣິໂພກການ ເຮັດຕາມຄໍາສັ່ງສອນ ເຮັດຖືກຕາມໂອວາດ ໝົດຄວາມສົງໄສ ບໍ່ມີຄໍາຖາມໃດ ໆ ມີຄວາມແກ່ກ້າ ບໍ່ຕ້ອງເຊື່ອໃຜອີກ ໃນຫລັກຄໍາສອນຂອງພຣະສາດສະດາຂອງຕົນ ມີຢູ່ບໍ?"

"ວັດສະ ອຸປາສິກາທັງຫລາຍຜູ້ເປັນສາວິກາຂອງເຮົາ ຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ບໍຣິໂພກການ ເຮັດຕາມຄໍາສັ່ງສອນ ເຮັດຖືກຕາມໂອວາດ ໝົດຄວາມສົງໄສ ບໍ່ມີຄໍາຖາມ ໃດ ໆ ມີຄວາມແກ່ກ້າ ບໍ່ຕ້ອງເຊື່ອໃຜອີກ ໃນຫລັກຄໍາສອນຂອງພຣະສາດສະດາ ບໍ່ແມ່ນມີພຽງ ໑໐໐ ຄົນ ໒໐໐ ຄົນ ໓໐໐ ຄົນ ໔໐໐ ຄົນ ໕໐໐ ຄົນ ຄວາມຈິງແລ້ວມີຢູ່ຈໍານວນຫຼາຍຢ່າງແນ່ນອນ"

## ການພໍ່າເພັງທໍາໃຫ້ບໍລິບູນ

[໑໙໖] ວັດສະໂຄດປະຣິພາຊົກທູນຖາມ(ຕໍ່ໄປ)ວ່າ "ຂ້າແດ່ທ່ານພຣະໂຄດົມ ຖ້າທ່ານພຣະໂຄດົມທີ່ນັ້ນໄດ້ຊົງພໍ່າເພັງທໍານີ້ໃຫ້ບໍລິບູນ ແຕ່ພວກພິກຂຸຈັກບໍ່ໄດ້ພໍ່າເພັງໃຫ້ບໍລິບູນ ດ້ວຍເຫດນັ້ນ ພົມມະຈັນນີ້ອາດຈະບໍ່ບໍລິບູນແນວນີ້ ແຕ່ຍ້ອນທ່ານພຣະໂຄດົມຊົງພໍ່າເພັງທໍານີ້ໃຫ້ບໍລິບູນ ແລະ ພວກພິກຂຸກໍພໍ່າເພັງໃຫ້ບໍລິບູນດ້ວຍເຫດນັ້ນ ພົມມະຈັນນີ້ຈຶ່ງບໍລິບູນໄດ້ແນວນີ້

ຖ້າທ່ານພຣະໂຄດົມໄດ້ຊົງພໍ່າເພັງທໍານີ້ໃຫ້ບໍລິບູນ ແລະ ພວກພິກຂຸໄດ້ພໍ່າເພັງໃຫ້ບໍລິບູນ ແຕ່ພວກພິກຂຸນີບໍ່ໄດ້ພໍ່າເພັງໃຫ້ບໍລິບູນ ດ້ວຍເຫດນັ້ນ ພົມມະຈັນນີ້ອາດຈະບໍ່ບໍລິບູນແນວນີ້ ແຕ່ຍ້ອນທ່ານພຣະໂຄດົມຊົງພໍ່າເພັງທໍານີ້ໃຫ້ບໍລິບູນ ແລະ ພວກພິກຂຸ ກໍໄດ້ພໍ່າເພັງໃຫ້ບໍລິບູນ ທັງພວກພິກຂຸນີກໍພໍ່າເພັງໃຫ້ບໍລິບູນ ດ້ວຍເຫດນັ້ນ ພົມມະຈັນນີ້ຈຶ່ງບໍລິບູນໄດ້ແນວນີ້

ຖ້າທ່ານພຣະໂຄດົມໄດ້ຊົງພໍ່າເພັງທໍານີ້ໃຫ້ບໍລິບູນ ພວກພິກຂຸໄດ້ພໍ່າເພັງໃຫ້ບໍລິບູນ ແລະທັງພວກພິກຂຸນີກໍໄດ້ພໍ່າເພັງໃຫ້ບໍລິບູນ ແຕ່ພວກອຸປາສົກຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ເປັນເພື່ອນພົມມະຈາຣີ ບໍ່ພໍ່າເພັງໃຫ້ບໍລິບູນ ດ້ວຍເຫດນັ້ນ ພົມມະຈັນນີ້ອາດຈະບໍ່ບໍລິບູນ ແນວນີ້ ແຕ່ຍ້ອນທ່ານພຣະໂຄດົມໄດ້ພໍ່າເພັງທໍານີ້ໃຫ້ບໍລິບູນ ພວກພິກຂຸໄດ້ພໍ່າເພັງໃຫ້ບໍລິບູນ ພວກພິກຂຸນີໄດ້ພໍ່າເພັງໃຫ້ບໍລິບູນ ແລະ ພວກອຸປາສົກຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ເປັນເພື່ອນພົມມະຈາຣີ ກໍໄດ້ພໍ່າເພັງໃຫ້ບໍລິບູນ ດ້ວຍເຫດນັ້ນ ພົມມະຈັນນີ້ຈຶ່ງບໍລິບູນໄດ້ແນວນີ້

ຖ້າທ່ານພຣະໂຄດົມໄດ້ຊົງພໍ່າເພັງທໍານີ້ໃຫ້ບໍລິບູນ ພວກພິກຂຸໄດ້ພໍ່າເພັງໃຫ້ບໍລິບູນ ພວກພິກຂຸນີໄດ້ພໍ່າເພັງໃຫ້ບໍລິບູນ ແລະ ພວກອຸປາສົກຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ເປັນ

ເພື່ອນພົມມະຈາຣີ ໄດ້ພໍ່າເພັງໃຫ້ບໍລິບູນ ແຕ່ພວກອຸປາສົກຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ບໍຣິໂພກການ ບໍ່ໄດ້ພໍ່າເພັງໃຫ້ບໍລິບູນ ດ້ວຍເຫດນັ້ນ ພົມມະຈັນນີ້ອາດຈະບໍ່ ບໍລິບູນແນວນີ້ ແຕ່ຍ້ອນທ່ານພຣະໂຄດົມໄດ້ຊົງພໍ່າເພັງທໍານີ້ໃຫ້ບໍລິບູນ ພວກພິກຂຸ ໄດ້ພໍ່າເພັງໃຫ້ບໍລິບູນ ພວກພິກຂຸນີໄດ້ພໍ່າເພັງໃຫ້ບໍລິບູນ ພວກອຸປາສົກຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ເປັນເພື່ອນພົມມະຈາຣີໄດ້ພໍ່າເພັງໃຫ້ບໍລິບູນ ແລະພວກອຸປາສົກຜູ້ເປັນ ຄະຫຼືຫັດ ນຸ່ງຂາວຫົ່ມຂາວ ບໍຣິໂພກການກໍໄດ້ພໍ່າເພັງໃຫ້ບໍລິບູນ ດ້ວຍເຫດນັ້ນ ພົມມະຈັນນີ້ຈຶ່ງບໍລິບູນໄດ້ແນວນີ້

ຖ້າທ່ານພຣະໂຄດົມໄດ້ຊົງພໍ່າເພັງທໍານີ້ໃຫ້ບໍລິບູນ ພວກພິກຂຸໄດ້ພໍ່າເພັງໃຫ້ບໍລິບູນ ພວກພິກຂຸນີໄດ້ພໍ່າເພັງໃຫ້ບໍລິບູນ ພວກອຸປາສົກຜູ້ເປັນຄະຫຼືຫັດນຸ່ງຂາວຫົ່ມຂາວ ເປັນເພື່ອນພົມມະຈາຣີ ໄດ້ພໍ່າເພັງໃຫ້ບໍລິບູນ ແລະ ພວກອຸປາສົກຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ບໍຣິໂພກການ ໄດ້ພໍ່າເພັງໃຫ້ບໍລິບູນ ແຕ່ພວກອຸປາສິກາຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ເປັນເພື່ອນພົມຈາຣິນີ ບໍ່ໄດ້ພໍ່າເພັງໃຫ້ບໍລິບູນ ດ້ວຍເຫດນັ້ນ ພົມມະຈັນນີ້ອາດຈະບໍ່ບໍລິບູນແນວນີ້ ແຕ່ຍ້ອນທ່ານພຣະໂຄດົມໄດ້ຊົງພໍ່າເພັງທໍານີ້ໃຫ້ບໍລິບູນ ພວກພິກຂຸໄດ້ພໍ່າເພັງທໍານີ້ໃຫ້ບໍລິບູນ ພວກພິກຂຸນີໄດ້ພໍ່າເພັງທໍານີ້ໃຫ້ບໍລິບູນ ພວກອຸປາສົກ ຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ເປັນເພື່ອນພົມມະຈາຣີ ໄດ້ພໍ່າເພັງໃຫ້ບໍລິບູນ ພວກອຸປາສົກ ຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ບໍຣິໂພກການ ໄດ້ພໍ່າເພັງໃຫ້ບໍລິບູນ ແລະ ພວກອຸປາສິກາ ຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ເປັນເພື່ອນພົມຈາຣິນີ ກໍໄດ້ພໍ່າເພັງໃຫ້ບໍລິບູນ ດ້ວຍເຫດນັ້ນ ພົມມະຈັນນີ້ຈຶ່ງບໍລິບູນໄດ້ແນວນີ້

ຖ້າທ່ານພຣະໂຄດົມໄດ້ຊົງພໍ່າເພັງທໍານີ້ໃຫ້ບໍລິບູນ ພວກພິກຂຸໄດ້ພໍ່າເພັງໃຫ້ບໍລິບູນ ພວກພິກຂຸນີໄດ້ພໍ່າເພັງໃຫ້ບໍລິບູນ ພວກອຸປາສົກຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ເປັນເພື່ອນພົມມະຈາຣີ ໄດ້ພໍ່າເພັງໃຫ້ບໍລິບູນ ພວກອຸປາສົກຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ບໍຣິໂພກການ ໄດ້ພໍ່າເພັງໃຫ້ບໍລິບູນ ແລະພວກອຸປາສິກາຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ເປັນເພື່ອນພົມຈາຣິນີ ໄດ້ພໍ່າເພັງໃຫ້ບໍລິບູນ ແຕ່ພວກອຸປາສິກາຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ບໍຣິໂພກການ ບໍ່ໄດ້ພໍ່າເພັງໃຫ້ບໍລິບູນ ດ້ວຍເຫດນັ້ນ ພົມມະຈັນນີ້ອາດຈະບໍ່ບໍລິບູນແນວນີ້

ແຕ່ຍ້ອນທ່ານພຣະໂຄດົມໄດ້ຊົງພໍ່າເພັງທໍານີ້ໃຫ້ບໍລິບູນ ພວກພິກຂຸໄດ້ພໍ່າເພັງໃຫ້ບໍລິບູນ ພວກພິກຂຸນີໄດ້ພໍ່າເພັງໃຫ້ບໍລິບູນ ພວກອຸປາສົກຜູ້ເປັນຄະຫຼືຫັດ ນຸ່ງຂາວ ຫົ່ມຂາວ ເປັນເພື່ອນພົມມະຈາຣີ ໄດ້ພໍ່າເພັງໃຫ້ບໍລິບູນ ພວກອຸປາສົກຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ບໍຣິໂພກການ ໄດ້ພໍ່າເພັງໃຫ້ບໍລິບູນ ພວກອຸປາສິກາຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ເປັນເພື່ອນພົມຈາຣິນີ ໄດ້ພໍ່າເພັງໃຫ້ບໍລິບູນ ແລະພວກອຸປາສິກາ ຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ບໍຣິໂພກການ ກໍໄດ້ພໍ່າເພັງໃຫ້ບໍລິບູນ ດ້ວຍເຫດນັ້ນ ພົມມະຈັນນີ້ຈຶ່ງບໍລິບູນໄດ້ແນວນີ້

## ວັດສະໂຄດປະຣິພາຊົກຂໍບັນພະຊາ

[໑໙໗] ຂ້າແດ່ ທ່ານພຣະໂຄດົມ ແມ່ນ້ຳຄົງຄາມີແຕ່ຈະໄຫຼຫລັ່ງລົ້ນໄປສູ່ມະຫາສະມຸດ ລວມກັນຢູ່ໃນມະຫາສະມຸດ ແມ່ນສັນໃດ ບໍລິສັດຂອງທ່ານພຣະໂຄດົມເຊິ່ງມີທັງຄະຫຼືຫັດ ແລະບັນພະຊິດກໍສັນນັ້ນຄືກັນ ມີແຕ່ມຸ້ງໄປ ກ້າວໄປ ແລະ ດຳເນີນໄປສູ່ນິບພານ ບັນລຸນິບພານຢູ່ ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດ ທຳແຈ້ງຊັດໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫລົງທາງ ຫຼືເຍືອງ ໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍຂ້າພຣະອົງເພິ່ງໄດ້ບັນພະຊາອຸປະສົມບົດໃນສຳນັກຂອງທ່ານພຣະໂຄດົມເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ວັດສະ ຜູ້ເຄີຍເປັນອັນຍະເດຍຣະຖີປະສົງຈະບັນພະຊາອຸປະສົມບົດໃນທຳວິໄນນີ້ ຈະຕ້ອງຢູ່ປະຣິວາດ໑ ໔ ເດືອນ ຫລັງຈາກ ໔ ເດືອນລ່ວງໄປແລ້ວ ເມື່ອພິກຂຸທັງຫລາຍເຕັມໃຈຈຶ່ງຈະໃຫ້ບັນພະຊາອຸປະສົມບົດເປັນພິກຂຸໄດ້ ອັນໜຶ່ງ ໃນເລື້ອງນີ້ ເຮົາຄຳນຶງ ເຖິງຄວາມແຕກຕ່າງລະຫວ່າງບຸກຄົນດ້ວຍ"

"ຂ້າແດ່ພຣະອົງຜູ້ຈະເລີນ ຫາກຜູ້ເຄີຍເປັນອັນຍະເດຍຣະຖີປະສົງຈະບັນພະຊາອຸປະສົມບົດ ໃນພຣະທຳວິໄນນີ້ ຈະຕ້ອງຢູ່ປະຣິວາດ ໔ ເດືອນ ຫລັງຈາກ ໔ ເດືອນລ່ວງໄປແລ້ວ ເມື່ອພິກຂຸທັງຫລາຍພໍໃຈກໍຈະໃຫ້ບັນພະຊາອຸປະສົມບົດເປັນພິກຂຸ ຂ້າພຣະອົງຈັກຂໍຢູ່ປະຣິວາດ ໔ ປີ ຫລັງຈາກ ໔ ປີລ່ວງໄປແລ້ວ ເມື່ອພິກຂຸທັງຫລາຍພໍໃຈກໍຈົ່ງໃຫ້ບັນພະຊາອຸປະສົມບົດ ເປັນພິກຂຸເທີ້ນ"

ເປັນອັນວ່າ ວັດສະໂຄດປະຣິພາຊົກ ໄດ້ບັນພະຊາອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວ ດ້ວຍອາການຢ່າງນີ້ແລ

## ສະມະຖະວິປັດສະນາ

ທ່ານພຣະວັດສະໂຄດອຸປະສົມບົດແລ້ວບໍ່ດົນ ຄື ອຸປະສົມບົດໄດ້ເຄິ່ງເດືອນ ກໍໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຜົນ ໓ ເບື້ອງຕ່ຳມີປະມານທໍ່ໃດເຊິ່ງບຸກຄົນຈະເພິ່ງບັນລຸດ້ວຍ ຍານຂອງພຣະເສຂະ ແລະ ດ້ວຍວິດຊາຂອງພຣະເສຂະ ຜົນນັ້ນທັງໝົດຂ້າພຣະອົງບັນລຸແລ້ວ ຂໍພຣະຜູ້ມີພຣະພາກເຈົ້າຊົງສະແດງທຳທີ່ຍິ່ງຂຶ້ນໄປແກ່ຂ້າພຣະອົງເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ວັດສະ ຖ້າເຊັ່ນນັ້ນ ທ່ານຈົ່ງຈະເລີນທຳ ໒ ປະການ ຄື (໑) ສະມະຖະ (໒) ວິປັດສະນາ ໃຫ້ຍິ່ງຂຶ້ນໄປເທີ້ນ ທຳ ໒ ປະການ ຄື (໑) ສະມະຖະ (໒) ວິປັດສະນາ ນີ້ເຊິ່ງທ່ານຈະເລີນໃຫ້ຍິ່ງຂຶ້ນໄປແລ້ວ ຈັກເປັນໄປເພື່ອຮູ້ແຈ້ງທຳມະທາດຫຼາຍປະການ

## ອະພິນຍາ ໖

[໑໗໗] ວັດສະ ທ່ານອາດຈະຫວັງວ່າ "ເຮົາຄວນບັນລຸອິດທິວິທະຍານສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ຜາກົດ ຫຼືໃຫ້ຫາຍໄປກໍໄດ້ ຊອດຝາ ກຳແພງ (ແລະ) ພູໄປໄດ້ບໍ່ຕິດຂັດຄື ໄປໃນບ່ອນວ່າງກໍໄດ້ ຜຸດຂຶ້ນຫຼືດຳລົງໃນແຜ່ນດິນຄືໄປໃນນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳ ບໍ່ແຍກຄືຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດຄືນົກບິນໄປກໍໄດ້ ໃຊ້ຝາມືລູບຄຳດວງຈັນດວງອາທິດ ອັນມີລິດຫຼາຍ ມີອານຸພາບຫຼາຍກໍໄດ້ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້"

ເມື່ອມີເຫດຢູ່ ທ່ານກໍຈັກບັນລຸຄວາມເປັນຜູ້ສາມາດໃນອິດທິວິທະຍານສະແດງລິດໄດ້ຫຼາຍແນວນັ້ນໄດ້ແນ່ (໑)

ທ່ານອາດຈະຫວັງວ່າ "ເຮົາຄວນໄດ້ຍິນສຽງ ໒ ຊະນິດ ຄື (໑) ສຽງທິບ (໒) ສຽງມະນຸດ ທັງທີ່ຢູ່ໄກແລະຢູ່ໃກ້ດ້ວຍຫູທິບອັນບໍລິສຸດເໜືອມະນຸດ"

ເມື່ອມີເຫດຢູ່ ທ່ານຈັກບັນລຸຄວາມເປັນຜູ້ສາມາດໃນທິພພະໂສຕະທາດໄດ້ແນ່ (໒)

ທ່ານອາດຈະຫວັງວ່າ "ເຮົາເພິ່ງກຳນົດຮູ້ຈິດຂອງສັດ ແລະ ບຸກຄົນອື່ນໄດ້ດ້ວຍຈິດຂອງຕົນ ຄື ຈິດມີຣາຄະກໍຮູ້ວ່າ "ຈິດມີຣາຄະ" ຫຼື ຈິດປາສະຈາກຣາຄະກໍຮູ້ວ່າ "ຈິດປາສະຈາກຣາຄະ" ຈິດມີໂທສະກໍຮູ້ວ່າ "ຈິດມີໂທສະ" ຫຼືຈິດປາສະຈາກໂທສະກໍຮູ້ວ່າ "ຈິດປາສະຈາກໂທສະ" ຈິດມີໂມຫະກໍຮູ້ວ່າ "ຈິດມີໂມຫະ" ຫຼື ຈິດປາສະຈາກໂມຫະກໍຮູ້ວ່າ "ຈິດປາສະຈາກໂມຫະ" ຈິດຫົດຫູ່ກໍຮູ້ວ່າ "ຈິດຫົດຫູ່" ຫຼື ຈິດຟຸ້ງຊ່ານກໍຮູ້ວ່າ "ຈິດຟຸ້ງຊ່ານ"ຈິດເປັນມະຫັກຄະຕະ (ຈິດເຖິງຄວາມເປັນໃຫຍ່) ກໍຮູ້ວ່າ "ຈິດເປັນມະຫັກຄະຕະ" ຫຼື ຈິດບໍ່ເປັນມະຫັກຄະຕະກໍຮູ້ວ່າ "ຈິດບໍ່ເປັນມະຫັກຄະຕະ" ຈິດມີຈິດອື່ນຍິ່ງກວ່າກໍຮູ້ວ່າ "ຈິດມີຈິດອື່ນຍິ່ງກວ່າ" ຫຼື ຈິດບໍ່ມີຈິດອື່ນຍິ່ງກວ່າກໍຮູ້ວ່າ "ຈິດບໍ່ມີຈິດອື່ນຍິ່ງກວ່າ" ຈິດເປັນສະມາທິກໍຮູ້ວ່າ "ຈິດເປັນສະມາທິ" ຫຼື ຈິດບໍ່ເປັນສະມາທິກໍຮູ້ວ່າ "ຈິດບໍ່ເປັນສະມາທິ" ຈິດລຸດພົ້ນກໍຮູ້ວ່າ "ຈິດລຸດພົ້ນ" ຫຼື ຈິດບໍ່ລຸດພົ້ນກໍຮູ້ວ່າ "ຈິດບໍ່ລຸດພົ້ນ"

ເມື່ອມີເຫດຢູ່ ທ່ານກໍຈັກບັນລຸຄວາມເປັນຜູ້ສາມາດໃນເຈໂຕປະຣິຍະຍານນັ້ນໄດ້ແນ່ (໓)

ທ່ານອາດຈະຫວັງວ່າ "ເຮົາຄວນຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດ ແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດ ແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບ ເປັນຈຳນວນຫລາຍແດ່ ຕະຫຼອດວິວັດຕະກັບເປັນຈຳນວນຫລາຍແດ່ ຕະຫຼອດສັງວັດຕະກັບແລະ ວິວັດຕະກັບເປັນຈຳນວນຫລາຍແດ່ວ່າ "ໃນພົບນັ້ນເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາ ຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນ ກໍໄປເກີດໃນພົບນັ້ນ ແມ່ນໃນ ພົບນັ້ນເຮົາກໍມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນຈຶ່ງມາເກີດໃນພົບນີ້" ເຮົາຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະ ທົ່ວໄປ ແລະ ຊີວະປະຫວັດແນວນີ້"

ເມື່ອມີເຫດຢູ່ ທ່ານຈັກບັນລຸຄວາມເປັນຜູ້ສາມາດໃນປຸບເພນິວາສານຸດສະຕິຍານນັ້ນ ໄດ້ ແນ່ (໔)

ທ່ານອາດຈະຫວັງວ່າ "ເຮົາຄວນເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳ ແລະ ຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງ ເຖິງໝູ່ ສັດຜູ້ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດ ຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນ ຜິດ ພວກເຂົາຫລັງຈາກຕາຍແລ້ວຈະໄປບັງເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ແຕ່ໝູ່ສັດ ທີ່ ປະກອບກາຍສຸດຈະຣິດ ວະຈີສຸຈະຣິດ ແລະມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີ ຄວາມເຫັນຖືກ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກ ພວກເຂົາຫລັງຈາກຕາຍແລ້ວ ຈະໄປບັງເກີດ ໃນສຸຄະຕິໂລກສະຫວັນ" ເຮົາເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະ ຊັ້ນສູງ ງາມແລະ ບໍ່ງາມ ເກີດດີແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ ສັດຜູ້ເປັນໄປ ຕາມກຳແນວນີ້ແລ"

ເມື່ອມີເຫດຢູ່ ທ່ານຈັກບັນລຸຄວາມເປັນຜູ້ສາມາດໃນຈຸຕູປະປາຕະຍານນັ້ນໄດ້ແນ່ (໕)

ວັດສະ ທ່ານອາດຈະຫວັງວ່າ "ເຮົາຄວນເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ ມີອາສະວະຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ"

ເມື່ອມີເຫດຢູ່ ທ່ານຈັກບັນລຸຄວາມເປັນຜູ້ສາມາດໃນອາສະວັກຂະຍະຍານນັ້ນໄດ້ແນ່" (໖)

[໑໙໙] ຄັ້ງນັ້ນ ທ່ານພຣະວັດສະໂຄດຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກ ເຈົ້າ ລຸກຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຫລີກ

ອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ບໍ່ດົນປານໃດ ໄດ້ເຮັດໃຫ້ແຈ້ງ ປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ໄດ້ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ທ່ານພຣະວັດສະໂຄດໄດ້ເປັນພຣະອະຣະຫັນອົງໜຶ່ງບັນດາພຣະອະຣະຫັນທັງຫລາຍ

[໔໐໐] ສະໄໝນັ້ນ ພິກຂຸຈຳນວນຫຼາຍພາກັນໄປເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ທ່ານພຣະວັດສະໂຄດໄດ້ເຫັນພິກຂຸເຫຼົ່ານັ້ນກຳລັງຍ່າງມາແຕ່ໄກ ຈຶ່ງເຂົ້າໄປຫາພິກຂຸເຫຼົ່ານັ້ນຈົນເຖິງທີ່ຢູ່ແລ້ວຖາມວ່າ "ທ່ານຜູ້ມີອາຍຸທັງຫລາຍ ພວກທ່ານກຳລັງຈະໄປໃສກັນ"

ພິກຂຸເຫຼົ່ານັ້ນຕອບວ່າ "ທ່ານຜູ້ມີອາຍຸ ພວກເຮົາຈະໄປເຝົ້າພຣະຜູ້ມີພຣະພາກເຈົ້າ"

ທ່ານພຣະວັດສະໂຄດກ່າວວ່າ "ທ່ານຜູ້ມີອາຍຸທັງຫລາຍ ຖ້າເຊັ່ນນັ້ນ ຂໍພວກທ່ານຈົ່ງຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ແລະຈົ່ງຂາບທູນແນວນີ້ ຕາມຄຳຂອງຂ້າພະເຈົ້າວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸຊື່ວັດສະໂຄດຂໍຖວາຍອະພິວາດ ພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ແລະຂໍຂາບທູນແນວນີ້ວ່າ "ຂ້າພຣະອົງໄດ້ປົນນິບັດ໔ພຣະຜູ້ມີພຣະພາກເຈົ້າແລ້ວ ຂ້າພຣະອົງໄດ້ປົນນິບັດພຣະສຸຄົດແລ້ວ"

ພິກຂຸເຫຼົ່ານັ້ນຮັບຄຳແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານພຣະວັດສະໂຄດ ຂໍຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ແລະ ຂໍໃຫ້ຂາບທູນແນວນີ້ວ່າ "ຂ້າພຣະອົງໄດ້ປົນນິບັດພຣະຜູ້ມີພຣະພາກເຈົ້າແລ້ວ ຂ້າພຣະອົງໄດ້ປົນນິບັດ ພຣະສຸຄົດແລ້ວ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫລາຍ ເຮົາກຳນົດຮູ້ຈິດຂອງພິກຂຸຊື່ວັດສະໂຄດດ້ວຍຈິດຂອງເຮົາກ່ອນແລ້ວວ່າ "ພິກຂຸຊື່ວັດສະໂຄດເປັນຜູ້ມີວິດຊາ ໓ ມີລິດຫຼາຍ ມີອານຸພາບຫຼາຍ" ແມ່ນເທວະດາທັງຫລາຍກໍບອກເນື້ອຄວາມນີ້ແກ່ເຮົາແລ້ວວ່າ "ຂ້າແດ່ ພຣະອົງ ຜູ້ຈະເລີນພິກຂຸຊື່ວັດສະໂຄດເປັນຜູ້ມີວິດຊາ ໓ ມີລິດຫຼາຍ ມີອານຸພາບຫຼາຍ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະຫາວັດສະໂຄດຕະສູດທີ ໑ ຈົບ**

# ໔. ທີຄະນະຂະສູດ

## ວ່າດ້ວຍປະຣິພາຊົກຊື່ທີຄະນະຂະ

[໔໐໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ຖໍ້າສູກະຣະຂາຕາ ທີ່ພູຄິດຊະກູດ ເຂດນະຄອນຣາດຊະຄຶ ຄັ້ງນັ້ນແລ ປະຣິພາຊົກຊື່ທີຄະນະຂະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນ ແລ້ວຢືນຢູ່ທີ່ທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ທ່ານພຣະໂຄດົມ ຄວາມຈິງ ຂ້າພຣະອົງມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສິ່ງທັງປວງບໍ່ເປັນທີ່ພໍໃຈແກ່ເຮົາ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອັກຄິເວດສະນະ ແມ່ນທິດຖິຂອງທ່ານທີ່ວ່າ "ສິ່ງທັງປວງບໍ່ເປັນທີ່ພໍໃຈແກ່ເຮົາ" ນັ້ນ ກໍບໍ່ໜ້າເປັນທີ່ພໍໃຈແກ່ທ່ານດ້ວຍ"

"ທ່ານພຣະໂຄດົມ ຂ້າພຣະອົງກໍຍັງພໍໃຈທິດຖິນັ້ນວ່າ "ແມ່ນຄຳກ່າວນັ້ນກໍຈະເພິ່ງເປັນເຊັ່ນນັ້ນ ແມ່ນຄຳກ່າວນັ້ນກໍຈະເພິ່ງເປັນເຊັ່ນນັ້ນ"

"ອັກຄິເວດສະນະ ຄົນເຫຼົ່າໃດກ່າວແນວນີ້ວ່າ "ແມ່ນຄຳກ່າວນັ້ນກໍຈະເພິ່ງເປັນເຊັ່ນນັ້ນ ແມ່ນຄຳກ່າວນັ້ນກໍຈະເພິ່ງເປັນເຊັ່ນນັ້ນ" ໃນໂລກນີ້ ຄົນເຫຼົ່ານັ້ນລະທິດຖິນັ້ນບໍ່ໄດ້ ແລະຍັງຍຶດຖືທິດຖິອື່ນຢູ່ ຄົນເຫຼົ່ານັ້ນມີຈຳນວນຫລາຍກວ່າຄົນທີ່ລະໄດ້

ຄົນເຫຼົ່າໃດກ່າວແນວນີ້ວ່າ "ແມ່ນຄຳກ່າວນັ້ນກໍຈະເພິ່ງເປັນເຊັ່ນນັ້ນ ແມ່ນຄຳກ່າວນັ້ນກໍຈະເພິ່ງເປັນເຊັ່ນນັ້ນ" ໃນໂລກນີ້ ຄົນເຫຼົ່ານັ້ນລະທິດຖິນັ້ນໄດ້ ແລະບໍ່ຍຶດຖືທິດຖິອື່ນ ຄົນເຫຼົ່ານັ້ນມີຈຳນວນໜ້ອຍກວ່າຄົນທີ່ລະບໍ່ໄດ້

## ທິດຖິເປັນເຫດໃຫ້ເກີດຜິດຖຽງ

ມີສະມະນະພາມພວກໜຶ່ງຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສິ່ງທັງປວງເປັນທີ່ພໍໃຈແກ່ເຮົາ"

ມີສະມະນະພາມອີກພວກໜຶ່ງຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສິ່ງທັງປວງບໍ່ເປັນທີ່ພໍໃຈແກ່ເຮົາ"

ມີສະມະນະພາມອີກພວກໜຶ່ງຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ບາງສິ່ງເປັນທີ່ພໍໃຈແກ່ເຮົາ ບາງສິ່ງບໍ່ເປັນທີ່ພໍໃຈແກ່ເຮົາ"

ບັນດາທິດຖິເຫຼົ່ານັ້ນ ທິດຖິຂອງສະມະນະພາມຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສິ່ງທັງປວງເປັນທີ່ພໍໃຈແກ່ເຮົາ" ນັ້ນ ຢູ່ໃກ້ຄວາມກຳໜັດ ໃກ້ກິເລດເຄື່ອງຜູກມັດສັດໄວ້ ໃກ້ກິເລດເປັນເຫດເພີດເພີນ ໃກ້ກິເລດເປັນເຫດເກາະຕິດ ໃກ້ກິເລດເປັນເຫດຍຶດໝັ້ນ

ອັກຄິເວດສະນະ ບັນດາທິດຖິເຫຼົ່ານັ້ນ ທິດຖິຂອງສະມະນະພາມຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສິ່ງທັງປວງບໍ່ເປັນທີ່ພໍໃຈແກ່ເຮົາ" ນັ້ນ ຢູ່ໃກ້ຄວາມບໍ່ກຳໜັດ ໃກ້ທຳ ເປັນເຄື່ອງປົດສັດ ໃກ້ທຳທີ່ບໍ່ເປັນເຫດເພີດເພີນ ໃກ້ທຳທີ່ບໍ່ເປັນເຫດ ເກາະຕິດ ໃກ້ທຳທີ່ບໍ່ເປັນເຫດຍຶດໝັ້ນ"

[໒໐໔] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທີຄະນະຂະປະຣິພາຊົກໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ທ່ານພຣະໂຄດົມຍ້ອງຍໍທິດຖິຂອງຂ້າພຣະອົງຫຼື ທ່ານພຣະໂຄດົມຍ້ອງຍໍທິດຖິຂອງຂ້າພຣະອົງແມ່ນບໍ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອັກຄິເວດສະນະ ບັນດາທິດຖິເຫຼົ່ານັ້ນ ທິດຖິຂອງສະມະນະພາມຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ບາງສິ່ງເປັນທີ່ພໍໃຈແກ່ເຮົາ ບາງສິ່ງບໍ່ເປັນທີ່ພໍໃຈແກ່ເຮົາ" ນັ້ນ ສ່ວນທີ່ເຫັນວ່າເປັນທີ່ພໍໃຈ ຢູ່ໃກ້ຄວາມກຳໜັດ ໃກ້ກິເລດເປັນເຄື່ອງຜູກມັດສັດໄວ້ ໃກ້ກິເລດເປັນເຫດເພີດເພີນ ໃກ້ກິເລດເປັນເຫດເກາະຕິດ ໃກ້ກິເລດເປັນເຫດຍຶດໝັ້ນ ສ່ວນທີ່ເຫັນວ່າບໍ່ເປັນທີ່ພໍໃຈ ຢູ່ໃກ້ຄວາມບໍ່ກຳໜັດ ໃກ້ທຳເປັນເຄື່ອງປົດສັດ ໃກ້ທຳທີ່ບໍ່ເປັນເຫດເພີດເພີນ ໃກ້ທຳທີ່ບໍ່ເປັນເຫດເກາະຕິດ ໃກ້ທຳທີ່ບໍ່ເປັນເຫດຍຶດໝັ້ນ

ບັນດາທິດຖິເຫຼົ່ານັ້ນ ທິດຖິຂອງສະມະນະພາມຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສິ່ງທັງປວງເປັນທີ່ພໍໃຈແກ່ເຮົາ" ນັ້ນ ວິນຍູຊົນຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ຖ້າເຮົາຈະ ຍຶດໝັ້ນຖືໝັ້ນທິດຖິຂອງເຮົາວ່າ "ສິ່ງທັງປວງເປັນທີ່ພໍໃຈແກ່ເຮົາ" ແລ້ວຢັ້ງຢືນແນວ ແຂງຂັນວ່າ "ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ເຮົາກໍຈະເພິ່ງຖືຜິດຈາກສະມະນະພາມ ໒ ພວກນີ້ ຄື

໑. ສະມະໜະ ຫຼື ພາມຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສິ່ງທັງປວງບໍ່ເປັນທີ່ພໍໃຈແກ່ເຮົາ"

໒. ສະມະໜະ ຫຼື ພາມຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ບາງສິ່ງເປັນທີ່ພໍໃຈແກ່ເຮົາ ບາງສິ່ງບໍ່ເປັນທີ່ພໍໃຈແກ່ເຮົາ"

ເມື່ອເຮົາຖືຜິດຈາກສະມະນະພາມ ໒ ພວກນີ້ ກໍຈະມີການທຸ່ມຖຽງກັນ ເມື່ອມີການທຸ່ມຖຽງກັນ ກໍຈະມີການທຳລາຍກັນ ເມື່ອມີການທຳລາຍກັນ ກໍຈະມີການບຽດບຽນກັນ ວິນຍູຊົນນັ້ນ

ເມື່ອພິຈາລະນາເຫັນການຖືຜິດກັນ ການທຸ່ມຖຽງກັນ ການທຳລາຍກັນ ແລະ ການບຽດບຽນກັນ ໃນຕົນ ຈຶ່ງລະທິດຖິນັ້ນ ແລະບໍ່ຍຶດຖືທິດຖິອື່ນ ການລະ ການກຳຈັດຖິ້ມທິດຖິ ເຫຼົ່ານັ້ນ ຍ່ອມມີໄດ້ດ້ວຍປະການແບບນີ້

[໒໐໓] ອັກຄິເວດສະນະ ບັນດາທິດຖິເຫຼົ່ານັ້ນ ທິດຖິຂອງສະມະນະພາມຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ສິ່ງທັງປວງບໍ່ເປັນທີ່ພໍໃຈແກ່ເຮົາ" ວິນຍູຊົນຍ່ອມພິຈາລະນາເຫັນ ດັ່ງນີ້ວ່າ "ຖ້າເຮົາຍຶດໝັ້ນຖືໝັ້ນທິດຖິຂອງເຮົາວ່າ "ສິ່ງທັງປວງບໍ່ເປັນທີ່ພໍໃຈແກ່ເຮົາ" ແລ້ວຢັ້ງຢືນ ແບບແຂງຂັນວ່າ "ນີ້ທີ່ນັ້ນຈິງ ແບບອື່ນບໍ່ຈິງ" ເຮົາກໍຈະເພິ່ງຖືຜິດຈາກສະມະນະພາມ ໒ ພວກນີ້ ຄື

໑. ສະມະໜະ ຫຼື ພາມຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ສິ່ງທັງປວງເປັນທີ່ພໍໃຈແກ່ເຮົາ"

໒. ສະມະໜະ ຫຼື ພາມຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ບາງສິ່ງເປັນທີ່ພໍໃຈແກ່ເຮົາ ບາງສິ່ງບໍ່ເປັນທີ່ພໍໃຈແກ່ເຮົາ"

ເມື່ອເຮົາຖືຜິດຈາກສະມະນະພາມ ໒ ພວກນີ້ ກໍຈະມີການທຸ່ມຖຽງກັນ ເມື່ອມີການທຸ່ມຖຽງກັນ ກໍຈະມີການທຳລາຍກັນ ເມື່ອມີການທຳລາຍກັນ ກໍຈະມີການບຽດບຽນກັນ ວິນຍູຊົນນັ້ນ ເມື່ອພິຈາລະນາເຫັນການຖືຜິດກັນ ການທຸ່ມຖຽງກັນ ການທຳລາຍກັນ ແລະການ ບຽດບຽນກັນ ໃນຕົນ ຈຶ່ງລະທິດຖິນັ້ນ ແລະບໍ່ຍຶດຖືທິດຖິອື່ນ ການລະ ການກຳຈັດຖິ້ມທິດຖິ ເຫຼົ່ານັ້ນ ຍ່ອມມີໄດ້ດ້ວຍປະການແບບນີ້

[໒໐໔] ອັກຄິເວດສະນະ ບັນດາທິດຖິເຫຼົ່ານັ້ນ ທິດຖິຂອງສະມະນະພາມຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ບາງສິ່ງເປັນທີ່ພໍໃຈແກ່ເຮົາ ບາງສິ່ງບໍ່ເປັນທີ່ພໍໃຈແກ່ເຮົາ" ນັ້ນ ວິນຍູຊົນຍ່ອມພິຈາລະນາເຫັນດັ່ງນີ້ວ່າ "ຖ້າເຮົາຍຶດໝັ້ນຖືໝັ້ນທິດຖິຂອງເຮົາວ່າ "ບາງສິ່ງເປັນທີ່ພໍໃຈແກ່ເຮົາ ບາງສິ່ງບໍ່ເປັນທີ່ພໍໃຈແກ່ເຮົາ" ແລ້ວຢັ້ງຢືນແບບແຂງຂັນວ່າ "ນີ້ທີ່ນັ້ນຈິງ ແບບອື່ນບໍ່ຈິງ" ເຮົາກໍຈະເພິ່ງຖືຜິດຈາກສະມະນະພາມ ໒ ພວກນີ້ ຄື

໑. ສະມະໜະ ຫຼື ພາມຜູ້ມີວາທະແບບນີ້ ມີທິດຖິແບບນີ້ວ່າ "ສິ່ງທັງປວງເປັນທີ່ພໍໃຈແກ່ເຮົາ"

໒. ສະມະໜະ ຫຼື ພາມມີວາທະແບບນີ້ ມີທິດຖິແບບນີ້ວ່າ "ສິ່ງທັງປວງບໍ່ເປັນທີ່ພໍໃຈແກ່ເຮົາ"

ເມື່ອເຮົາຖືຜິດຈາກສະມະນະພາມ ໒ ພວກນີ້ ກໍຈະມີການທຸ່ມຖຽງກັນ ເມື່ອມີການທຸ່ມຖຽງກັນ ກໍຈະມີການທຳລາຍກັນ ເມື່ອມີການທຳລາຍກັນ ກໍຈະມີການບຽດບຽນກັນ ວິນຍູຊົນນັ້ນ

ເມື່ອພິຈາລະນາເຫັນການຖືຜິດກັນ ການທຸ່ມຖຽງກັນ ການທຳລາຍກັນ ແລະ ການບຽດບຽນກັນໃນຕົນ ຈຶ່ງລະທິດຖິນັ້ນ ແລະ ບໍ່ຍຶດຖືທິດຖິອື່ນ ການລະ ການກຳຈັດຖິ້ມທິດຖິເຫຼົ່ານັ້ນ ຍ່ອມມີໄດ້ດ້ວຍປະການແນວນີ້

[໔໐໕] ອັກຄິເວດສະນະ ຮູບກາຍນີ້ເກີດຈາກມະຫາພູຕະຮູບ ໔ ມີມານດາບິດາເປັນແດນເກີດ ເຕີບໂຕດ້ວຍເຂົ້າສຸກແລະເຂົ້າໜົມກຸມມາດ ມີຄວາມບໍ່ທ່ຽງ ມີການລູບທາບີບນວດ ແຕກສະຫຼາຍ ແລະກະຈັດກະຈາຍໄປເປັນທຳມະດາ ທ່ານຄວນພິຈາລະນາເຫັນໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ເປັນຄືພະຍາດ ເປັນຄືຫົວຝີ ເປັນຄືລູກສອນ ເປັນສິ່ງຄັບແຄ້ນ ເປັນສິ່ງບຽດບຽນ ເປັນຄືຜູ້ອື່ນ ເປັນສິ່ງທີ່ຕ້ອງແຕກສະຫຼາຍ ເປັນຂອງວ່າງເປົ່າ ເປັນອະນັດຕາ ເມື່ອທ່ານພິຈາລະນາເຫັນກາຍນີ້ໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ເປັນຄືພະຍາດ ເປັນຄືຫົວຝີ ເປັນຄືລູກສອນ ເປັນສິ່ງຄັບແຄ້ນ ເປັນສິ່ງບຽດບຽນ ເປັນຄືຜູ້ອື່ນ ເປັນສິ່ງທີ່ຕ້ອງແຕກສະຫຼາຍ ເປັນຂອງວ່າງເປົ່າ ເປັນອະນັດຕາ ທ່ານຍ່ອມລະຄວາມພໍໃຈໃນກາຍ ຄວາມເຍື່ອໃຍໃນກາ ແລະ ຄວາມຍອມຕາມກາຍໄດ້

## ເວທະນາ ໓

ເວທະນາ ໓ ປະການນີ້ ຄື

໑. ສຸກຂະເວທະນາ
໒. ທຸກຂະເວທະນາ
໓. ອະທຸກຂະມະສຸກຂະເວທະນາ

ເມື່ອໃດບຸກຄົນໄດ້ສະເຫວີຍສຸກຂະເວທະນາ ເມື່ອນັ້ນເຂົາບໍ່ໄດ້ສະເຫວີຍທຸກຂະເວທະນາ ບໍ່ໄດ້ສະເຫວີຍ ອະທຸກຂະມະສຸກຂະເວທະນາ ໄດ້ສະເຫວີຍແຕ່ສຸກຂະເວທະນາທີ່ນັ້ນ ເມື່ອໃດບຸກຄົນສະເຫວີຍທຸກຂະເວທະນາ ເມື່ອນັ້ນ ເຂົາບໍ່ໄດ້ສະເຫວີຍສຸກຂະເວທະນາ ບໍ່ໄດ້ສະເຫວີຍອທຸຂົມສຸກຂະເວທະນາ ໄດ້ສະເຫວີຍແຕ່ທຸກຂະເວທະນາທີ່ນັ້ນ ເມື່ອໃດບຸກຄົນສະເຫວີຍອະທຸກຂະມະສຸກຂະເວທະນາ ເມື່ອນັ້ນ ເຂົາຍ່ອມບໍ່ໄດ້ສະເຫວີຍສຸກຂະເວທະນາ ບໍ່ໄດ້ສະເຫວີຍທຸກຂະເວທະນາ ໄດ້ສະເຫວີຍແຕ່ອະທຸກຂະມະສຸກຂະເວທະນາທີ່ນັ້ນ

ສຸກຂະເວທະນາບໍ່ທ່ຽງ ຖືກປັດໃຈປຸງແຕ່ງຂຶ້ນ ອາໄສປັດໃຈເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ແລະ ດັບໄປເປັນທຳມະດາ ແມ່ນທຸກຂະເວທະນາກໍບໍ່ທ່ຽງ ຖືກປັດໃຈປຸງແຕ່ງຂຶ້ນ ອາໄສປັດໃຈເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ແລະ ດັບໄປເປັນ ທຳມະດາ ແມ່ນອະທຸກຂະມະສຸກຂະເວທະນາກໍບໍ່ທ່ຽງ ຖືກປັດໃຈປຸງແຕ່ງຂຶ້ນ ອາໄສປັດໃຈເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ແລະ ດັບໄປເປັນທຳມະດາ

ອະຣິຍະສາວົກຜູ້ໄດ້ສະດັບແລ້ວ ເມື່ອເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍສຸກຂະເວທະນາ ທຸກຂະເວທະນາ ແລະ ອະທຸກຂະມະສຸກຂະເວທະນາ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດຈຶ່ງລຸດພົ້ນ ເມື່ອລຸດພົ້ນແລ້ວ ກໍມີຍານຫຍັ່ງຮູ້ວ່າລຸດພົ້ນແລ້ວ ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ອັກຄິເວດສະນະ ພິກຂຸຜູ້ມີຈິດລຸດພົ້ນແລ້ວແນວນີ້ ຍ່ອມບໍ່ຜິດຖຽງຜິດຖຽງທຸ່ມຖຽງກັບໃຜ ໆ ໂວຫານໃດທີ່ຊາວໂລກນິຍົມເວົ້າກັນກໍບໍ່ຢຶດໝັ້ນກ່າວໄປຕາມໂວຫານນັ້ນ"

[໔໐໖] ສະໄໝນັ້ນ ທ່ານພຣະສາຣີບຸດຢືນຖວາຍງານພັດ ນະ ເບື້ອງພຣະປຣິດສະດາງພຣະຜູ້ມີພຣະພາກເຈົ້າ ໄດ້ຄິດວ່າ "ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຍິ່ງແລ້ວ ຕັດການລະທຳເຫຼົ່ານັ້ນ ໆ ແກ່ເຮົາທັງຫລາຍ ພຣະສຸຄົດຊົງຮູ້ຍິ່ງແລ້ວ ຕັດການກຳຈັດຖິ້ມທຳເຫຼົ່ານັ້ນ ໆ ແກ່ເຮົາທັງຫລາຍ" ເມື່ອທ່ານພຣະສາຣີບຸດພິຈາລະນາເຫັນຢູ່ແນວນີ້ ຈິດກໍລຸດພົ້ນຈາກອາສະວະທັງຫລາຍ ບໍ່ຖືໝັ້ນດ້ວຍອຸປາທານ

ທຳຈັກຂຸອັນປາສະຈາກທຸລີ ແລະ ປາສະຈາກມົນທິນໄດ້ເກີດຂຶ້ນແລ້ວແກ່ທີຄະນະຂະປະຣິພາຊົກວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ"

## ທີຄະນະຂະປະຣິພາຊົກສະແດງຕົນເປັນອຸປາສົກ

ລຳດັບນັ້ນ ທີຄະນະຂະປະຣິພາຊົກເຫັນທຳ ບັນລຸທຳ ຮູ້ທຳ ຢັ່ງລົງສູ່ທຳ ໝົດຄວາມສົງໄສ ບໍ່ມີຄຳຖາມໃດ ໆ ມີຄວາມແກ່ກ້າ ບໍ່ຕ້ອງເຊື່ອໃຜອີກໃນຫລັກ ຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫລົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" ດັ່ງນີ້ແລ

**ທີຄະນະຂະສູດທີ ໔ ຈົບ**

# ໕. ມາຄັນທິຍະສູດ

## ວ່າດ້ວຍປະຣິພາຊົກຊື່ມາຄັນທິຍະ

[໔໐໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບເທິງເຄື່ອງປູລາດເຊິ່ງເຮັດດ້ວຍຫຍ້າ ໃນໂຮງບູຊາໄຟ ຂອງພາມພາຣະທະວາຊະໂຄດ ນິຄົມຂອງຊາວກຸຣຸຊື່ກຳມາດທຳມະ ແຄວ້ນກຸຣຸ ເມື່ອເວລາເຊົ້າມາຮອດ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກຖືບາດ ແລະ ຈີວອນເຂົ້າໄປບິນທະບາດຍັງນິຄົມຊື່ ກຳມາດທຳມະ ຊົງທ່ຽວບິນທະບາດໃນກຳມາສະທຳມະນິຄົມແລ້ວ ສະເດັດກັບຈາກບິນທະບາດພາຍຫລັງສະເຫວີຍພຣະກະຍາຫານສຳເລັດແລ້ວ ສະເດັດເຂົ້າໄປສູ່ແຄມປ່າແຫ່ງໜຶ່ງເພື່ອປະທັບພັກຜ່ອນກາງເວັນ ໄດ້ປະທັບນັ່ງພັກຜ່ອນກາງເວັນໃຕ້ເຫງົ້າໄມ້ແຫ່ງໜຶ່ງ ລຳດັບນັ້ນ ປະຣິພາຊົກຊື່ ມາຄັນທິຍະຍ່າງທ່ຽວຫລິ້ນຢູ່ ເຂົ້າໄປສູ່ໂຮງບູຊາໄຟຂອງພາມພາຣະທະວາຊະໂຄດ ໄດ້ເຫັນເຄື່ອງປູລາດເຮັດດ້ວຍຫຍ້າໃນໂຮງບູຊາໄຟຂອງພາມພາຣະທະວາຊະໂຄດ ຈຶ່ງຖາມວ່າ

"ສະຫາຍ ເຄື່ອງປູລາດທີ່ເຮັດດ້ວຍຫຍ້າເຊິ່ງປູລາດໄວ້ໃນໂຮງບູຊາໄຟຂອງທ່ານພາຣະທະວາຊະນີ້ ເປັນຂອງໃຜ ເບິ່ງຄືຈະເປັນທີ່ນອນຂອງສະມະນະແລ້ວຕີ"

ພາຣະທະວາຊະໂຄດພາມຕອບວ່າ "ແມ່ນ ທ່ານມາຄັນທິຍະ ພຣະສະມະນະໂຄດົມຜູ້ເປັນສາກະຍະບຸດອອກບວດຈາກສາກະຍະຕະກູນ ທ່ານພຣະໂຄດົມນັ້ນມີກິດຕິສັບອັນງາມ ຊ່າລືໄປແລ້ວແນວນີ້ວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະໃນສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີຝຶກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫລາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ທີ່ນອນນີ້ປູລາດໄວ້ສຳລັບທ່ານພຣະໂຄດົມນັ້ນ"

"ທ່ານພາຣະທະວາຊະ ພວກເຮົາຜູ້ທີ່ໄດ້ເຫັນທີ່ນອນຂອງທ່ານພຣະໂຄດົມຜູ້ທຳລາຍຄວາມຈະເລີນນັ້ນ ນັບວ່າໄດ້ເຫັນສິ່ງທີ່ບໍ່ເປັນມຸງຄຸນ"

"ທ່ານມາຄັນທິຍະ ທ່ານຈົ່ງຖືຮັກສາວາຈານີ້ໄວ້ ທ່ານມາຄັນທິຍະ ທ່ານຈົ່ງຖືຮັກສາວາຈານີ້ໄວ້ ຄວາມຈິງ ກະສັດຜູ້ເປັນບັນດິດກໍດີ ພາມຜູ້ເປັນບັນດິດກໍດີ ຄະຫະບໍດີຜູ້ເປັນບັນດິດກໍດີ ສະມະນະຜູ້ເປັນບັນດິດກໍດີ ມີຈຳນວນຫຼາຍ ພາກັນເຫຼື້ອມໃສທ່ານພຣະສະມະນະໂຄດົມພຣະອົງ

ນັ້ນເປັນຢ່າງຍິ່ງ ຍ້ອນທ່ານພຣະສະມະນະໂຄດົມຊົງແນະນຳແຕ່ທຳທີ່ເຮັດໃຫ້ຄົນສະຫຼາດ ຮອບຮູ້ແລະເປັນອະຣິຍະ"

"ທ່ານພາຣະທະວາຊະ ຖ້າເຮົາພະເຊີນໜ້າກັບທ່ານພຣະໂຄດົມນັ້ນ ເຮົາກໍກ້າເວົ້າຕໍ່ໜ້າທ່ານພຣະໂຄດົມວ່າ "ພຣະສະມະນະໂຄດົມເປັນຜູ້ທຳລາຍຄວາມຈະເລີນ" ຂໍ້ນັ້ນຍ້ອນເຫດໃດຍ້ອນຄຳເວົ້າແນວນີ້ຢູ່ໃນສູດຂອງເຮົາ"

"ທ່ານມາຄັນທິຍະ ຖ້າການກ່າວຄຳນັ້ນ ບໍ່ເປັນການໜັກໃຈແກ່ທ່ານມາຄັນທິຍະລະກໍ ຂ້າພະເຈົ້າຈັກຂາບທູນພຣະສະມະນະໂຄດົມພຣະອົງນັ້ນໃຫ້ຊົງຮູ້"

"ທ່ານພາຣະທະວາຊະ ຢ່າກັງວົນເລີຍ ເຮົາໄດ້ເວົ້າໄວ້ແລ້ວ ເຊີນທ່ານເວົ້າກັບພຣະສະມະນະໂຄດົມນັ້ນເທີ້ນ"

[໔໐໗] ພຣະຜູ້ມີພຣະພາກເຈົ້າຊົງສະດັບຄຳສົນທະນານີ້ຂອງພາມພາຣະທະວາຊະໂຄດກັບມາຄັນຖິຍປະຣິພາຊົກດ້ວຍທິພພະໂສຕະອັນບໍລິສຸດເໜືອມະນຸດ ເມື່ອເວລາແລງ ພຣະຜູ້ມີພຣະພາກເຈົ້າ ຊົງອອກຈາກທີ່ຫຼີບຫຼີກ ສະເດັດເຂົ້າໄປສູ່ໂຮງບູຊາໄຟຂອງພາມພາຣະທະວາຊະໂຄດ ປະທັບນັ່ງເທິງເຄື່ອງປູລາດເຊິ່ງເຮັດດ້ວຍຫຍ້າທີ່ປູລາດໄວ້ແລ້ວ ລຳດັບນັ້ນ ພາມພານທວາດໂຄດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ທີ່ທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຕັດກັບພາມພາຣະທະວາຊະໂຄດນັ້ນວ່າ "ພາຣະທະວາຊະ ທ່ານກັບມາຄັນຖິຍປະຣິພາຊົກຜາຣົບເຖິງເຄື່ອງປູລາດເຊິ່ງເຮັດດ້ວຍຫຍ້ານີ້ ໄດ້ເຈລະຈາໂຕ້ຕອບກັນແນວໃດແດ່"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພາຣະທະວາຊະໂຄດພາມຈົນວ່າຕະລຶງ ຂົນລຸກ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າພຣະອົງປາຖະໜາທີ່ຈະຂາບທູນເລື້ອງນີ້ແກ່ທ່ານພຣະໂຄດົມຢູ່ແລ້ວ ແຕ່ທ່ານພຣະໂຄດົມໄດ້ຕັດຖາມກ່ອນທີ່ຂ້າພຣະອົງຈະໄດ້ຂາບທູນ"

ເມື່ອພຣະຜູ້ມີພຣະພາກເຈົ້າກັບພາມພາຣະທະວາຊະໂຄດສົນທະນາກັນຄ້າງຢູ່ນັ້ນ ມາຄັນຖິຍປະຣິພາຊົກຜູ້ກຳລັງຍ່າງທ່ຽວຫລິ້ນຢູ່ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າທີ່ໂຮງບູຊາໄຟຂອງພາມພາຣະທະວາຊະໂຄດ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກ ເຖິງກັນແລ້ວຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບມາຄັນຖິຍປະຣິພາຊົກວ່າ

## ຕັດຖາມມາຄັນຖິຍປະຣິພາຊົກເລື້ອງການສັງລວມອິນຊີ

[໔໐໘] "ມາຄັນທິຍະ ຕາມີຮູບເປັນທີ່ຍິນດີ ຍິນດີແລ້ວໃນຮູບ ອັນຮູບໃຫ້ບັນເທີງແລ້ວຕານັ້ນຕະຖາຄົດເຝິກດີແລ້ວ ຄຸ້ມຄອງດີແລ້ວ ຖືຮັກສາດີແລ້ວ ສັງລວມດີແລ້ວ ອັນໜຶ່ງ ຕະຖາ

ຄົດ ຍ່ອມສະແດງທຳເພື່ອສັງລວມຕານັ້ນ

ມາຄັນທິຍະ ຄຳທີ່ທ່ານກ່າວວ່າ "ພຣະສະມະນະໂຄດົມເປັນຜູ້ທຳລາຍຄວາມຈະເລີນ" ນັ້ນ ທ່ານຄົງຈະໝາຍເຖິງຄວາມຂໍ້ນີ້ແລ້ວຕີ"

ມາຄັນທິຍປະຣິພາຊົກຂາບທູນວ່າ "ທ່ານພຣະໂຄດົມ ຄຳທີ່ຂ້າພຣະອົງກ່າວວ່າ "ພຣະສະມະນະໂຄດົມເປັນຜູ້ທຳລາຍຄວາມຈະເລີນ" ນີ້ ຂ້າພຣະອົງໝາຍເຖິງຄວາມຂໍ້ນັ້ນແລ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຄຳທີ່ເວົ້າແນວນີ້ຢູ່ໃນສູດຂອງຂ້າພຣະອົງ"

"ມາຄັນທິຍະ ຫູມີສຽງເປັນທີ່ຍິນດີ ຯລຯ ດັງມີກິ່ນເປັນທີ່ຍິນດີ ຯລຯ ລີ້ນມີຣົສເປັນທີ່ຍິນດີ ຯລຯ ກາຍມີການສຳຜັດເປັນທີ່ຍິນດີ ຯລຯ ໃຈມີທຳມາຣົມເປັນທີ່ຍິນດີ ຍິນດີແລ້ວໃນທຳມາຣົມ ອັນທຳມາຣົມໃຫ້ບັນເທີງແລ້ວ ໃຈນັ້ນຕະຖາຄົດເຝິກດີແລ້ວ ຄຸ້ມຄອງດີແລ້ວ ຖືຮັກສາດີແລ້ວ ສັງລວມດີແລ້ວ ອັນໜຶ່ງ ຕະຖາຄົດຍ່ອມສະແດງທຳເພື່ອສັງລວມໃຈນັ້ນ

ມາຄັນທິຍະ ຄຳທີ່ທ່ານກ່າວວ່າ "ພຣະສະມະນະໂຄດົມເປັນຜູ້ທຳລາຍຄວາມຈະເລີນ" ນັ້ນ ທ່ານຄົງຈະໝາຍເຖິງຄວາມຂໍ້ນີ້ແລ້ວຕີ"

"ທ່ານພຣະໂຄດົມ ຄຳທີ່ຂ້າພຣະອົງກ່າວວ່າ "ພຣະສະມະນະໂຄດົມເປັນຜູ້ທຳລາຍຄວາມຈະເລີນ" ນີ້ ຂ້າພຣະອົງໝາຍເຖິງຄວາມຂໍ້ນັ້ນແລ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຄຳ ທີ່ເວົ້າແນວນີ້ຢູ່ໃນສູດຂອງຂ້າພຣະອົງ"

[໔໑໐] "ມາຄັນທິຍະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄົນລາງຄົນໃນໂລກນີ້ເປັນຜູ້ເຄີຍໄດ້ຮັບການປິ່ນເປີດ້ວຍຮູບທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ສະໄໝຕໍ່ມາ ເຂົາຮູ້ຄວາມເກີດ ຄວາມດັບ ຄຸນ ໂທດ ແລະອຸບາຍເປັນເຄື່ອງສະບັດອອກໄປໄດ້ຕາມຄວາມເປັນຈິງ ລະຕັນຫາໃນຮູບໄດ້ ບັນເທົາຄວາມຮ້ອນຮົນທີ່ເກີດຍ້ອນຮູບໄດ້ ເປັນຜູ້ປາສະຈາກຄວາມຢາກ ມີຈິດສະງົບໃນພາຍໃນຢູ່ ມາຄັນທິຍະ ທ່ານມີອັນໃດທີ່ຈະກ່າວກັບທ່ານຜູ້ນີ້ບໍ"

"ທ່ານພຣະໂຄດົມ ຂ້າພຣະອົງບໍ່ມີອັນໃດທີ່ຈະກ່າວ"

"ມາຄັນທິຍະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄົນລາງຄົນໃນໂລກນີ້ເປັນຜູ້ເຄີຍໄດ້ຮັບການປິ່ນເປີດ້ວຍສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ ດ້ວຍກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ ດ້ວຍຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ ດ້ວຍໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ສະໄໝຕໍ່ມາ ເຂົາຮູ້ຄວາມເກີດ ຄວາມດັບ ຄຸນ ໂທດ ແລະອຸບາຍເປັນເຄື່ອງກຳຈັດໂຜດຖັບພະໃຫ້ອອກໄປໄດ້ຕາມຄວາມ

ເປັນຈິງ ລະຕັນຫາ ໃນໂຜດຖັບພະໄດ້ ບັນເທົາຄວາມຮ້ອນຮົນທີ່ເກີດຍ້ອນໂຜດຖັບພະໄດ້ ເປັນຜູ້ປາສະຈາກຄວາມ ຢາກ ມີຈິດສະງົບໃນພາຍໃນຢູ່ ມາຄັນທິຍະ ທ່ານມີອັນໃດທີ່ຈະກ່າວກັບທ່ານຜູ້ນີ້ບໍ່"

"ທ່ານພຣະໂຄດົມ ຂ້າພຣະອົງບໍ່ມີອັນໃດທີ່ຈະກ່າວ"

[໒໑໑] "ມາຄັນທິຍະ ແຕ່ກ່ອນເຮົາເປັນຄະຫຼືຫັດຄອງເຮືອນ ເປັນຜູ້ເອີບອີ່ມ ພັ່ງບພ້ອມດ້ວຍກາມມະຄຸນ ໕ ປະການ ປົນເປີຕົນຢູ່ດ້ວຍຮູບທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າ ປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ຯລຯ ດ້ວຍສຽງ ທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ ດ້ວຍກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ ດ້ວຍຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ ແຕ່ກ່ອນເຮົາເປັນຄະຫຼືຫັດຄອງເຮືອນ ເປັນຜູ້ເອີບອີ່ມພັ່ງບພ້ອມດ້ວຍກາມມະຄຸນ ໕ ປະການປົນເປີຕົນຢູ່ດ້ວຍໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ຜາສາດຂອງເຮົານັ້ນມີຢູ່ເຖິງ ໓ ຫລັງ ຄື

໑. ຜາສາດຫລັງໜຶ່ງເປັນບ່ອນຢູ່ໃນລະດູຝົນ
໒. ຜາສາດຫລັງໜຶ່ງເປັນບ່ອນຢູ່ໃນລະດູໜາວ
໓. ຜາສາດຫລັງໜຶ່ງເປັນບ່ອນຢູ່ໃນລະດູຮ້ອນ

ເຮົານັ້ນບໍ່ມີບຸຣຸດໃສ່ປົນ ມີແຕ່ສະຕີຖ້າປົນເປີຂັບກລ່ອມດົນຕີ ຢູ່ໃນຜາສາດເປັນທີ່ ຢູ່ໃນລະດູຝົນຕະຫຼອດ ໔ ເດືອນ ບໍ່ໄດ້ລົງຈາກຜາສາດເລີຍ

ສະໄໝຕໍ່ມາ ເຮົານັ້ນຮູ້ຄວາມເກີດ ຄວາມດັບ ຄຸນ ໂທດ ແລະອຸບາຍເປັນເຄື່ອງກຳຈັດກາມທັງຫລາຍໃຫ້ອອກໄປໄດ້ຕາມຄວາມເປັນຈິງ ລະຕັນຫາໃນກາມໄດ້ ບັນເທົາຄວາມຮ້ອນຮົນທີ່ເກີດຍ້ອນກາມໄດ້ ເປັນຜູ້ປາສະຈາກຄວາມຢາກ ມີຈິດສະງົບໃນພາຍໃນຢູ່ ເຮົາເຫັນໝູ່ສັດເຫຼົ່າອື່ນຜູ້ຍັງບໍ່ປາສະຈາກຄວາມກຳໜັດ ຖືກກາມຕັນຫາເກາະກິນຢູ່ ຖືກຄວາມຮ້ອນຮົນທີ່ເກີດຍ້ອນກາມແຜດເຜົາຢູ່ ເສບກາມຢູ່ ເຮົາກໍບໍ່ຍິນດີຕໍ່ສັດເຫຼົ່ານັ້ນ ທັງບໍ່ຍິນດີໃນກາມນັ້ນດ້ວຍ

ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນເຮົາເມື່ອຍິນດີດ້ວຍຄວາມຍິນດີທີ່ເວັ້ນຈາກກາມ ແລະ ອະກຸສົນທຳທັງຫລາຍ ອັນເຂົ້າເຖິງຄວາມສຸກທີ່ເປັນທິບ ຈຶ່ງບໍ່ຍິນດີຕໍ່ຄວາມສຸກຂັ້ນຕ່ຳ ແລະບໍ່ຍິນດີໃນຄວາມສຸກຂັ້ນຕ່ຳນັ້ນ

## ປຽບທຽບກາມຂອງມະນຸດກັບກາມທິບ

[໒໑໒] ມາຄັນທິຍະ ປຽບຄືຄະຫະບໍດີຫຼືບຸດຄະຫະບໍດີ ເປັນຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະ

ຫຼາຍ ເອີບອີ່ມພຽບພ້ອມດ້ວຍກາມມະຄຸນ ໕ ປະການ ປົນເປີຕົນຢູ່ ດ້ວຍຮູບທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ຯລຯ ດ້ວຍສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ ດ້ວຍກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ ດ້ວຍຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ ຄະຫະບໍດີຫຼືບຸດຄະຫະບໍດີ ເປັນຜູ້ຮັ່ງມີ ມີຊັບ ຫຼາຍ ມີໂພຄະຫຼາຍ ເອີບອີ່ມພຽບພ້ອມດ້ວຍກາມມະຄຸນ ໕ ປະການ ປົນເປີຕົນຢູ່ ດ້ວຍໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ເຂົາປະພຶດກາຍສຸດຈະຣິດ ວະຈີສຸຈະຣິດ ມະໂນສຸດຈະຣິດ ຫລັງຈາກຕາຍ ແລ້ວຈະເພິ່ງໄປເກີດໃນສຸຄະຕິໂລກສະຫວັນ ຈະເພິ່ງໄປເກີດໃນໝູ່ເທບຊັ້ນຕາວະຕິງສາ ເທບພະບຸດນັ້ນ ມີໝູ່ນາງອັບປະສອນຮ້ອມລ້ອມຢູ່ໃນສວນນັນທະວັນ ເອີບອີ່ມພຽບພ້ອມດ້ວຍກາມມະຄຸນທີ່ເປັນທິບ ປົນເປີຕົນຢູ່ໃນຕາວະຕິງສາເທວະໂລກນັ້ນ ເທບພະບຸດນັ້ນໄດ້ເຫັນຄະຫະບໍດີຫຼືບຸດຂອງຄະຫະບໍດີຜູ້ເອີບອີ່ມພຽບພ້ອມດ້ວຍກາມມະຄຸນ ໕ ປະການ ປົນເປີຕົນຢູ່

ມາຄັນທິຍະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ເທບພະບຸດນັ້ນມີໝູ່ນາງອັບປະສອນຮ້ອມລ້ອມ ຢູ່ໃນສວນນັນທະວັນ ເອີບອີ່ມພຽບພ້ອມດ້ວຍກາມມະຄຸນ ໕ ປະການ ປົນເປີ ຕົນຢູ່ ຈະເພິ່ງຍິນດີຕໍ່ຄະຫະບໍດີຫຼືບຸດຂອງຄະຫະບໍດີນັ້ນ ຫຼືຕໍ່ກາມມະຄຸນ ໕ ປະການ ຂອງມະນຸດ ຫຼືຈະວຽນກັບມາຫາກາມຂອງມະນຸດບໍ່"

"ບໍ່ ທ່ານພຣະໂຄດົມ ຂໍ້ນັ້ນຍ້ອນເຫດໃດ ຍ້ອນກາມທີ່ເປັນທິບເປັນສິ່ງທີ່ໜ້າຕ້ອງການຍິ່ງກວ່າແລະປະນີດຍິ່ງກວ່າກາມຂອງມະນຸດ"

"ມາຄັນທິຍະ ເຮົາກໍແນວນັ້ນຄືກັນ ເມື່ອຍັງຄອງເຮືອນຢູ່ໃນການກ່ອນ ເອີບອີ່ມພຽບພ້ອມດ້ວຍກາມມະຄຸນ ໕ ປະການ ປົນເປີຕົນຢູ່ ດ້ວຍຮູບທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ຯລຯ ດ້ວຍສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ ດ້ວຍກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ ດ້ວຍຣົດທີ່ເພິ່ງ ຮູ້ແຈ້ງທາງລີ້ນ ຯລຯ ເມື່ອຍັງຄອງເຮືອນຢູ່ໃນການກ່ອນ ເອີບອີ່ມພຽບພ້ອມດ້ວຍ ກາມມະຄຸນ ໕ ປະການ ປົນເປີຕົນຢູ່ ດ້ວຍໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ສະໄໝຕໍ່ມາ ເຮົາຮູ້ຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ອຸບາຍເປັນເຄື່ອງກຳຈັດກາມທັງຫລາຍໃຫ້ອອກໄປໄດ້ຕາມຄວາມເປັນຈິງ ລະຕັນຫາໃນກາມໄດ້ ບັນເທົາຄວາມຮ້ອນຮົນທີ່ເກີດຍ້ອນກາມໄດ້ ເປັນຜູ້ປາສະຈາກຄວາມຢາກ ມີຈິດສະງົບໃນພາຍໃນຢູ່ ເຮົານັ້ນເຫັນໝູ່ສັດເຫຼົ່າອື່ນຜູ້ຍັງບໍ່ປາສະຈາກຄວາມກຳໜັດໃນກາມ ຖືກກາມຕັນຫາເກາະກິນຢູ່ ຖືກຄວາມຮ້ອນຮົນທີ່ເກີດຍ້ອນກາມແຜດເຜົາຢູ່ ເສບກາມຢູ່ ເຮົາຈຶ່ງບໍ່ຍິນດີຕໍ່ສັດເຫຼົ່ານັ້ນ ທັງບໍ່ຍິນດີໃນກາມນັ້ນ

ດ້ວຍ ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນເຮົາເມື່ອຍິນດີດ້ວຍຄວາມຍິນດີທີ່ເວັ້ນຈາກກາມ ແລະ ອະກຸສົນທຳທັງຫລາຍ ອັນເຂົ້າເຖິງຄວາມສຸກທີ່ເປັນທິບ ຈຶ່ງບໍ່ຍິນດີຕໍ່ຄວາມສຸກຂັ້ນຕ່ຳ ແລະບໍ່ຍິນດີໃນຄວາມສຸກຂັ້ນຕ່ຳນັ້ນ

## ປຽບຜູ້ບໍຣິໂພກກາມຄືຄົນເປັນໂຣກເຮື້ອນ

[໔໑໓] ມາຄັນທິຍະ ປຽບຄືບຸຣຸດຜູ້ເປັນໂຣກຂີ້ທູດ ມີໂຕເປັນບາດ ມີໂຕ ພຸພອງ ມີເຊື້ອພະຍາດຄອຍບ່ອນທຳລາຍ ໃຊ້ເລັບເກົາປາກບາດ ໃຊ້ຖ່ານໄຟຮົມກາຍໃຫ້ຮ້ອນ ມິດ ອຳມາດຍາດສາໂລຫິດຂອງເຂົາເຊີນແພດຜູ້ຊ່ຽວຊານການປາດມາຖືຮັກສາ ແພດຜູ້ນັ້ນເພິ່ງປະກອບຢາຮັກສາໃຫ້ ເຂົາອາໄສຢາແລ້ວຈຶ່ງຫາຍຈາກໂຣກຂີ້ທູດ ຫາຍຈາກໂຣຄຮ້າຍ ມີຄວາມສະບາຍຂຶ້ນລຸກຍ່າງໄດ້ເອງ ໄປໄສມາໃດໄດ້ເອງຕາມຄວາມພໍໃຈ ບຸຣຸດນັ້ນເຫັນບຸຣຸດຜູ້ເປັນໂຣກຂີ້ທູດຄົນອື່ນມີໂຕເປັນບາດ ມີໂຕພຸພອງ ມີເຊື້ອພະຍາດຄອຍບ່ອນທຳລາຍ ໃຊ້ເລັບເກົາປາກບາດ ໃຊ້ຖ່ານໄຟຮົມກາຍໃຫ້ຮ້ອນ

ມາຄັນທິຍະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸຣຸດນັ້ນຈະເພິ່ງຍິນດີຕໍ່ບຸຣຸດຜູ້ເປັນໂຣກຂີ້ທູດຄົນນັ້ນ ຕໍ່ຂຸມຖ່ານໄຟ ຫຼືຕໍ່ການກ້ຳກືນຝືນໃຊ້ຢາ ແມ່ນບໍ"

"ບໍ່ແມ່ນ ທ່ານພຣະໂຄດົມ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເມື່ອຍັງມີພະຍາດ ກິດທີ່ກ່ຽວກັບການໃຊ້ຢາກໍຕ້ອງມີ ເມື່ອຫາຍພະຍາດ ກິດທີ່ກ່ຽວກັບຢາກໍໝົດໄປ"

"ມາຄັນທິຍະ ເຮົາກໍແນວນັ້ນຄືກັນ ເມື່ອຍັງຄອງເຮືອນຢູ່ໃນການກ່ອນ ເອີບອີ່ມພຽບພ້ອມດ້ວຍກາມມະຄຸນ ໕ ປະການ ປິ່ນເປີຕົນດ້ວຍຮູບທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າ ປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ຯລຯ ດ້ວຍສຽງ ທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ ດ້ວຍກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ ດ້ວຍຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ ເມື່ອຍັງຄອງເຮືອນຢູ່ໃນການກ່ອນ ເອີບອີ່ມພຽບພ້ອມດ້ວຍກາມມະຄຸນ ໕ ປະການ ປິ່ນເປີຕົນຢູ່ດ້ວຍໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ສະໄໝຕໍ່ມາ ເຮົາຮູ້ຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ອຸບາຍເປັນເຄື່ອງກຳຈັດກາມທັງຫລາຍໃຫ້ອອກໄປໄດ້ຕາມຄວາມເປັນຈິງ ລະຕັນຫາໃນກາມໄດ້ ບັນເທົາຄວາມຮ້ອນຮົນທີ່ເກີດຍ້ອນກາມໄດ້ ເປັນຜູ້ປາສະຈາກຄວາມຢາກ ມີຈິດສະງົບໃນພາຍໃນຢູ່ ເຮົານັ້ນເຫັນໝູ່ສັດເຫຼົ່າອື່ນຜູ້ຍັງບໍ່ປາສະຈາກຄວາມກຳໜັດໃນກາມ ຖືກກາມຕັນຫາເກາະກິນຢູ່ ຖືກຄວາມຮ້ອນຮົນທີ່ເກີດຍ້ອນກາມແຜດເຜົາຢູ່ ເສບກາມຢູ່ ເຮົາຈຶ່ງບໍ່ຍິນດີຕໍ່ສັດເຫຼົ່ານັ້ນ ທັງບໍ່ຍິນດີໃນກາມນັ້ນ

ດ້ວຍ ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນເຮົາເມື່ອຍິນດີດ້ວຍຄວາມຍິນດີທີ່ເວັ້ນຈາກກາມ ແລະ ອະກຸສົນທຳທັງຫລາຍ ອັນເຂົ້າເຖິງຄວາມສຸກທີ່ເປັນທິບ ຈຶ່ງບໍ່ຍິນດີຕໍ່ຄວາມສຸກຂັ້ນຕ່ຳ ແລະ ບໍ່ຍິນດີໃນຄວາມສຸກຂັ້ນຕ່ຳນັ້ນ

[໔໑໔] ມາຄັນທິຍະ ປຽບຄື ບຸຣຸດຜູ້ເປັນໂຣກຂີ້ທູດ ມີໂຕເປັນບາດ ມີໂຕ ພຸພອງ ມີເຊື້ອພະຍາດຄອຍບ່ອນທຳລາຍ ໃຊ້ເລັບເກົາປາກບາດ ໃຊ້ຖ່ານໄຟຮົມກາຍໃຫ້ຮ້ອນ ມິດ ອຳມາດ ຍາດສາໂລຫິດຂອງເຂົາເຊີນແພດຜູ້ຊ່ຽວຊານການປາດມາຖືຮັກສາ ແພດຜູ້ນັ້ນເພິ່ງປະກອບຢາຮັກສາໃຫ້ ເຂົາອາໄສຢາແລ້ວຈຶ່ງຫາຍຈາກໂຣກຂີ້ທູດ ຫາຍຈາກໂຣຄຮ້າຍ ມີຄວາມສະບາຍຂຶ້ນລຸກຍ່າງໄດ້ເອງ ໄປໄສມາໃດໄດ້ເອງຕາມຄວາມພໍໃຈ ທີນັ້ນ ຄົນທີ່ ແຂງແຮງ ໔ ຄົນຊ່ອຍກັນຈັບເຂົາທີ່ແຂນຄົນລະຂ້າງ ດຶງເຂົາໃຫ້ເຂົ້າໄປທີ່ຂຸມຖ່ານໄຟ

ມາຄັນທິຍະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸຣຸດນັ້ນຕ້ອງດີ້ນຮົນໄປມາຂ້າງນີ້ແລະຂ້າງນັ້ນ ແມ່ນບໍ?"

"ແມ່ນ ທ່ານພຣະໂຄດົມ ຂໍ້ນັ້ນຍ້ອນເຫດໃດ ຍ້ອນໄຟມີສຳຜັດເປັນທຸກ ມີຄວາມ ຮ້ອນຫຼາຍ ແລະມີຄວາມຮ້ອນຮົນຫຼາຍ"

"ມາຄັນທິຍະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໄຟນັ້ນມີສຳຜັດເປັນທຸກ ມີຄວາມຮ້ອນຫຼາຍ ແລະມີຄວາມຮ້ອນຮົນຫຼາຍ ສະເພາະໃນບັດນີ້ທີ່ນັ້ນຫຼື ຫຼືວ່າແມ່ນແຕ່ກ່ອນ ໄຟນັ້ນກໍມີສຳຜັດເປັນທຸກ ມີຄວາມຮ້ອນຫຼາຍ ມີຄວາມຮ້ອນຮົນຫຼາຍ ຄືກັນ"

"ທ່ານພຣະໂຄດົມ ໄຟນັ້ນມີສຳຜັດເປັນທຸກ ມີຄວາມຮ້ອນຫຼາຍ ແລະ ມີຄວາມຮ້ອນຮົນຫຼາຍທັງໃນບັດນີ້ ແລະ ແມ່ນແຕ່ກ່ອນໄຟນັ້ນກໍມີສຳຜັດເປັນທຸກ ມີຄວາມຮ້ອນຫຼາຍ ມີຄວາມຮ້ອນຮົນຫຼາຍຄືກັນ ແຕ່ບຸຣຸດຜູ້ເປັນໂຣກຂີ້ທູດ ມີໂຕເປັນບາດ ມີໂຕພຸພອງ ຖືກເຊື້ອພະຍາດຄອຍບ່ອນທຳລາຍຢູ່ ໃຊ້ເລັບເກົາປາກບາດ ຖືກໂຣກຂີ້ທູດບຽດບຽນຮ່າງກາຍ ກັບເຂົ້າໃຈໄຟເຊິ່ງມີສຳຜັດເປັນທຸກວ່າເປັນຄວາມສຸກ"

"ມາຄັນທິຍະ ກາມທັງຫລາຍກໍແນວນັ້ນຄືກັນ ແມ່ນໃນອະດີດກໍມີສຳຜັດເປັນທຸກ ມີຄວາມຮ້ອນຫຼາຍ ແລະມີຄວາມຮ້ອນຮົນຫຼາຍ ໃນອະນາຄົດ ກາມທັງຫລາຍກໍມີສຳຜັດ ເປັນທຸກມີຄວາມຮ້ອນຫຼາຍ ແລະ ມີຄວາມຮ້ອນຮົນຫຼາຍ ແມ່ນໃນປັດຈຸບັນ ກາມທັງຫລາຍກໍມີ ສຳຜັດເປັນທຸກ ມີຄວາມຮ້ອນຫຼາຍ ແລະມີຄວາມຮ້ອນຮົນຫຼາຍ ສັດເຫລົ່ານີ້ເປັນຜູ້ຍັງ ບໍ່ປາສະຈາກຄວາມກຳໜັດໃນກາມ ຖືກກາມຕັນຫາເກາະກິນຢູ່ ຖືກຄວາມຮ້ອນຮົນທີ່ເກີດ ຍ້ອນກາມແຜດເຜົາຢູ່ ມີອິນຊີຖືກການກຳຈັດແລ້ວ ກັບເຂົ້າໃຈກາມເຊິ່ງມີສຳຜັດເປັນທຸກວ່າເປັນຄວາມສຸກໄປ

[໔໑໕] ມາຄັນທິຍະ ບຸຣຸດຜູ້ເປັນໂຣກຂີ້ທູດ ມີໂຕເປັນບາດ ມີໂຕພຸພອງ ມີເຊື້ອພະຍາດຄອຍບ່ອນທຳລາຍຢູ່ ໃຊ້ເລັບເກົາປາກບາດ ໃຊ້ຖ່ານໄຟຮົມກາຍໃຫ້ຮ້ອນ ບຸຣຸດຜູ້ເປັນ ໂຣກຂີ້ທູດ ມີໂຕເປັນບາດ ມີໂຕພຸພອງ ມີເຊື້ອພະຍາດຄອຍບ່ອນທຳລາຍຢູ່ ໃຊ້ເລັບເກົາ ປາກບາດໃຊ້ຖ່ານໄຟຮົມກາຍໃຫ້ຮ້ອນດ້ວຍປະການໃດ ໆ ປາກບາດເຫຼົ່ານັ້ນຂອງບຸຣຸດຜູ້ເປັນໂຣກຂີ້ທູດນັ້ນກໍເປັນຂອງບໍ່ສະອາດຫຼາຍຂຶ້ນ ມີກິ່ນເໝັນຫຼາຍຂຶ້ນ ແລະເນົ່າຫຼາຍຂຶ້ນ ດ້ວຍປະການນັ້ນ ໆ ແຕ່ເຂົາຈະມີພຽງຄວາມຍິນດີ ແລະຄວາມພໍໃຈຢູ່ແດ່ ກໍຍ້ອນການ ເກົາປາກບາດທີ່ນັ້ນ ແມ່ນສັນໃດ ສັດທັງຫລາຍກໍສັນນັ້ນຄືກັນ ຜູ້ຍັງບໍ່ປາສະຈາກຄວາມກຳໜັດໃນກາມ ຖືກກາມຕັນຫາເກາະກິນຢູ່ ຖືກຄວາມຮ້ອນຮົນທີ່ເກີດຍ້ອນກາມແຜດເຜົາຢູ່ ເສບກາມຢູ່ ສັດທັງຫລາຍຜູ້ຍັງບໍ່ປາສະຈາກຄວາມກຳໜັດໃນກາມ ຖືກກາມຕັນຫາເກາະກິນຢູ່ ຖືກຄວາມຮ້ອນຮົນທີ່ເກີດຍ້ອນກາມແຜດເຜົາຢູ່ ເສບກາມຢູ່ດ້ວຍປະການໃດ ໆ ກາມຕັນຫາຍ່ອມຈະເລີນແກ່ສັດເຫຼົ່ານັ້ນ ແລະສັດເຫຼົ່ານັ້ນກໍຖືກຄວາມຮ້ອນຮົນທີ່ເກີດຍ້ອນກາມແຜດເຜົາຢູ່ດ້ວຍປະການນັ້ນ ໆ ແລະເຂົາເຫຼົ່ານັ້ນຈະມີຄວາມຍິນດີ ແລະຄວາມພໍໃຈຢູ່ແດ່ກໍຍ້ອນອາໄສກາມມະຄຸນ ໕ ປະການນັ້ນເອງ

ມາຄັນທິຍະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ທ່ານໄດ້ເຫັນຫຼືໄດ້ຟັງມາແດ່ ບໍ່ວ່າ "ພຣະຣາຊາຫຼືມະຫາອຳມາດຂອງພຣະຣາຊາ ຜູ້ເອີບອິ່ມພັ່ງບພ້ອມດ້ວຍ ກາມມະຄຸນ ໕ ປະການ ປິ່ນເປີຕົນຢູ່ ຍັງລະກາມຕັນຫາບໍ່ໄດ້ ຍັງບັນເທົາຄວາມ ຮ້ອນຮົນທີ່ເກີດຍ້ອນກາມບໍ່ໄດ້ ແຕ່ເປັນຜູ້ປາສະຈາກຄວາມຢາກ ມີຈິດສະງົບໃນພາຍໃນ ຢູ່ແລ້ວ ກຳລັງຢູ່ ຫຼື ວ່າຈັກຢູ່"

"ບໍ່ ທ່ານພຣະໂຄດົມ"

"ດີແລ້ວ ມາຄັນທິຍະ ຂໍ້ນີ້ແມ່ນເຮົາກໍບໍ່ໄດ້ເຫັນມາ ບໍ່ໄດ້ຟັງມາວ່າ "ພຣະຣາຊາຫຼືມະຫາອຳມາດຂອງພຣະຣາຊາ ຜູ້ເອີບອິ່ມພັ່ງບພ້ອມດ້ວຍກາມມະຄຸນ ໕ ປະການ ປິ່ນເປີ ຕົນຢູ່ ຍັງລະກາມຕັນຫາບໍ່ໄດ້ ຍັງບັນເທົາຄວາມຮ້ອນຮົນທີ່ເກີດຍ້ອນກາມບໍ່ໄດ້ ແຕ່ເປັນຜູ້ປາສະຈາກຄວາມຢາກ ມີຈິດສະງົບໃນພາຍໃນຢູ່ແລ້ວ ກຳລັງຢູ່ ຫຼື ວ່າຈັກຢູ່"

ມາຄັນທິຍະ ແທ້ທີ່ຈິງສະມະໜະຫຼືພາມເຫຼົ່າໃດເຫຼົ່າໜຶ່ງທີ່ເປັນຜູ້ປາສະຈາກຄວາມຢາກ ມີຈິດສະງົບໃນພາຍໃນຢູ່ແລ້ວ ກຳລັງຢູ່ ຫຼື ວ່າຈັກຢູ່ ຍ້ອນສະມະນະ ຫຼື ພາມເຫຼົ່ານັ້ນທັງໝົດລ້ວນຮູ້ຄວາມເກີດ ຄວາມດັບ ຄຸນ ໂທດ ແລະອຸບາຍ ເປັນເຄື່ອງກຳຈັດກາມທັງຫລາຍໃຫ້ອອກໄປໄດ້ຕາມຄວາມເປັນຈິງ ລະກາມຕັນຫາໄດ້ ບັນເທົາ ຄວາມຮ້ອນຮົນທີ່ເກີດຍ້ອນກາມໄດ້ ຈຶ່ງເປັນຜູ້ປາສະຈາກຄວາມຢາກ ມີຈິດສະງົບໃນພາຍໃນ ຢູ່ແລ້ວ ກຳລັງຢູ່ ຫຼື ວ່າຈັກຢູ່"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງເປ່ງອຸທານນີ້ ໃນເວລານັ້ນ ວ່າ

"ຄວາມບໍ່ມີພະຍາດ ເປັນລາບອັນປະເສີດ

ນິບພານເປັນສຸກຢ່າງຍິ່ງ
ບັນດາທາງທັງຫລາຍອັນໃຫ້ເຖິງອະມະຕະທຳ
ທາງມີອົງ ໘ ເປັນທາງອັນກະເສມ"

[໔໑໖] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ມາຄັນທິຍປະຣິພາຊົກໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ທ່ານພຣະໂຄດົມ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທ່ານພຣະໂຄດົມຕັດໄວ້ດີແລ້ວ ວ່າ

"ຄວາມບໍ່ມີພະຍາດເປັນລາບອັນປະເສີດ
ນິບພານເປັນສຸກຢ່າງຍິ່ງ"

ຂ້າພຣະອົງກໍໄດ້ຟັງມາຈາກປະຣິພາຊົກທັງຫລາຍໃນການກ່ອນ ຜູ້ເປັນອາຈານແລະເປັນປາຈານຜູ້ກ່າວວ່າ

"ຄວາມບໍ່ມີພະຍາດເປັນລາບອັນປະເສີດ
ນິບພານເປັນສຸກຢ່າງຍິ່ງ"
ຄວາມຂໍ້ນັ້ນຈິ່ງສົມກັນ"

"ມາຄັນທິຍະ ຂໍ້ທີ່ທ່ານໄດ້ຟັງມາຈາກປະຣິພາຊົກທັງຫລາຍ ໃນການກ່ອນຜູ້ເປັນອາຈານແລະເປັນປາຈານຜູ້ກ່າວ ວ່າ

"ຄວາມບໍ່ມີພະຍາດເປັນລາບອັນປະເສີດ
ນິບພານເປັນສຸກຢ່າງຍິ່ງ"

ຄວາມບໍ່ມີພະຍາດນັ້ນ ເປັນແນວໃດ?

ນິບພານນັ້ນ ເປັນແນວໃດ?"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ໄດ້ຮູ້ວ່າ ມາຄັນທິຍປະຣິພາຊົກເອົາຝາມືລູບໂຕເອງແລ້ວກ່າວວ່າ "ຂ້າແດ່ ທ່ານພຣະໂຄດົມ ຄວາມບໍ່ມີພະຍາດນັ້ນຄືອັນນີ້ ນິບພານນັ້ນຄືອັນນີ້ ບັດນີ້ ຂ້າພຣະອົງເປັນຜູ້ບໍ່ມີພະຍາດ ມີຄວາມສຸກ ພະຍາດອັນໃດ ໆ ບໍ່ໄດ້ບຽດບຽນ ຂ້າພຣະອົງ"

## ປຽບຜູ້ບໍຣິໂພກການຄືຄົນຕາບອດ

[໔໑໗] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ມາຄັນທິຍະ ປຽບຄືຄົນຕາບອດມາແຕ່

ກຳເນີດ ເຂົາບໍ່ໄດ້ເຫັນຮູບສີດຳ ຮູບສີຂາວ ຮູບສີຂຽວ ຮູບສີເຫຼືອງ ຮູບສີແດງ ຮູບສີແສດ ບໍ່ໄດ້ເຫັນທີ່ອັນສະເໝີແລະບໍ່ສະເໝີ ບໍ່ໄດ້ເຫັນດວງດາວ ບໍ່ໄດ້ເຫັນດວງຈັນແລະດວງ ອາທິດ ເຂົາໄດ້ຟັງຈາກຄົນມີຕາດີຜູ້ກ່າວວ່າ "ທ່ານຜູ້ຈະເລີນ ຜ້າຂາວຜ່ອງງົດງາມຍິ່ງ ບໍ່ສົກກະປົກ ສະອາດສະອ້ານ"

ເຂົາຈຶ່ງທ່ຽວສະແຫວງຫາຜ້າຂາວ ບຸຣຸດຜູ້ໜຶ່ງເອົາຜ້າຊິ້ນຫຍາບເປື້ອນນ້ຳມັນມາລວງຄົນຕາບອດ ມາແຕ່ກຳເນີດນັ້ນວ່າ "ພໍ່ທ່ານ ຜ້າຜືນນີ້ ເປັນຜ້າຂາວຜ່ອງງົດງາມຍິ່ງ ບໍ່ສົກກະປົກ ສະອາດສະອ້ານ ເປັນຂອງທ່ານ"

ເຂົາຮັບເອົາຜ້ານັ້ນມາຫົ່ມ ເວົ້າອອກມາດ້ວຍຄວາມດີໃຈວ່າ "ພໍ່ທ່ານ ຜ້າຂາວຜ່ອງງົດງາມຍິ່ງ ບໍ່ສົກກະປົກ ສະອາດສະອ້ານຈິງ ໆ"

ມາຄັນທິຍະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄົນຕາບອດມາແຕ່ກຳເນີດນັ້ນ ຮູ້ຢູ່ເຫັນຢູ່ ຈຶ່ງຮັບເອົາຜ້າຊິ້ນຫຍາບເປື້ອນນ້ຳມັນນັ້ນມາຫົ່ມ ພ້ອມເວົ້າອອກມາດ້ວຍຄວາມດີໃຈວ່າ "ພໍ່ທ່ານ ຜ້າຂາວຜ່ອງງົດງາມຍິ່ງ ບໍ່ສົກກະປົກ ສະອາດສະອ້ານ" ຫຼື ວ່າເປ່ງວາຈາສະແດງຄວາມດີໃຈແນວນັ້ນຍ້ອນເຊື່ອຄົນມີຕາດີ"

ມາຄັນຖິຍປະຣິພາຊົກທູນຕອບວ່າ "ທ່ານພຣະໂຄດົມ ຄົນຕາບອດມາແຕ່ກຳເນີດນັ້ນ ບໍ່ຮູ້ ບໍ່ເຫັນຮັບເອົາຜ້າຊິ້ນຫຍາບທີ່ເປື້ອນນ້ຳມັນມາຫົ່ມພ້ອມເວົ້າອອກມາດ້ວຍຄວາມດີໃຈວ່າ "ພໍ່ທ່ານ ຜ້າຂາວຜ່ອງງົດງາມຍິ່ງ ບໍ່ສົກກະປົກ ສະອາດສະອ້ານ" ເປ່ງວາຈາສະແດງຄວາມ ດີໃຈແນວນັ້ນຍ້ອນເຊື່ອຄົນມີຕາດີ"

"ມາຄັນທິຍະ ອັນຍະເດຍຣະຖີປະຣິພາຊົກທັງຫລາຍກໍແນວນັ້ນຄືກັນ ເປັນຄົນ ຕາບອດບໍ່ມີຈັກຂຸ ບໍ່ຮູ້ຄວາມບໍ່ມີພະຍາດ ບໍ່ເຫັນນິບພານ ເມື່ອເປັນເຊັ່ນນັ້ນ ຍັງກ່າວ ຄາຖານີ້ໄດ້ວ່າ

"ຄວາມບໍ່ມີພະຍາດເປັນລາບອັນປະເສີດ
ນິບພານເປັນສຸກຢ່າງຍິ່ງ"

ພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງກ່ອນ ໆ ໄດ້ຕັດພຣະຄາຖາໄວ້ວ່າ

"ຄວາມບໍ່ມີພະຍາດເປັນລາບອັນປະເສີດ
ນິບພານເປັນສຸກຢ່າງຍິ່ງ
ບັນດາທາງທັງຫລາຍອັນໃຫ້ເຖິງອະມະຕະທຳ
ທາງມີອົງ ໘ ເປັນທາງອັນກະເສມ"

[໔໗໘] ບັດນີ້ ຄາຖານັ້ນເປັນຄາຖາຂອງປຸຖຸຊົນໄປໂດຍລຳດັບ ມາຄັນທິຍະ ກາຍນີ້ເປັນຄືພະຍາດ ເປັນຄືຫົວຝີ ເປັນຄືລູກສອນ ເປັນສິ່ງຄັບແຄ້ນ ເປັນສິ່ງບຽດບຽນ ທ່ານນັ້ນກ່າວກາຍນີ້ເຊິ່ງເປັນຄືພະຍາດ ເປັນຄືຫົວຝີ ເປັນຄືລູກສອນ ເປັນສິ່ງຄັບແຄ້ນ ເປັນສິ່ງ ບຽດບຽນວ່າ "ທ່ານພຣະໂຄດົມ ຄວາມບໍ່ມີພະຍາດນັ້ນຄືອັນນີ້ ນິບພານນັ້ນຄືອັນນີ້ ທ່ານບໍ່ມີອະຣິຍະຈັກຊຸ່ທີ່ເປັນເຄື່ອງຮູ້ຄວາມບໍ່ມີພະຍາດ ທີ່ເປັນເຄື່ອງເຫັນນິບພານໄດ້"

"ຂ້າພຣະອົງເຫຼື້ອມໃສທ່ານພຣະໂຄດົມແນວນີ້ ທ່ານພຣະໂຄດົມຊົງສາມາດສະແດງທຳແກ່ຂ້າພຣະອົງ ໂດຍວິທີທີ່ຂ້າພຣະອົງຈະຮູ້ຄວາມບໍ່ມີພະຍາດແລະເຫັນພຣະນິບພານໄດ້"

## ປຽບການສະແດງທຳກັບການຖືຮັກສາຄົນຕາບອດ

[໔໗໙] "ມາຄັນທິຍະ ປຽບຄືຄົນຕາບອດມາແຕ່ກຳເນີດ ເຂົາບໍ່ໄດ້ເຫັນຮູບ ສີດຳ ຮູບສີຂາວ ຮູບສີຂຽວ ຮູບສີເຫຼືອງ ຮູບສີແດງ ຮູບສີແສດ ບໍ່ໄດ້ເຫັນທີ່ອັນສະເໝີແລະ ບໍ່ສະເໝີ ບໍ່ໄດ້ເຫັນດວງດາວ ບໍ່ໄດ້ເຫັນດວງຈັນແລະດວງອາທິດ ມິດ ອຳມາດ ຍາດສາໂລຫິດຂອງເຂົາ ໄດ້ເຊີນແພດຜູ້ຊ່ຽວຊານການປາດມາຖືຮັກສາ ແພດຜູ້ຊ່ຽວຊານນັ້ນໄດ້ປະກອບຢາຮັກສາໃຫ້ ເຂົາອາໄສຢານັ້ນແຕ່ກໍເຫັນບໍ່ໄດ້ ເຮັດຕາໃຫ້ໃສບໍ່ໄດ້ ທ່ານເຂົ້າໃຈຄວາມ ຂໍ້ນັ້ນວ່າແນວໃດ ແພດຜູ້ນັ້ນຕ້ອງມີສ່ວນແຫ່ງຄວາມລຳບາກ ຄວາມຄັບແຄ້ນບໍ່ແມ່ນບໍ"

"ແມ່ນ ທ່ານພຣະໂຄດົມ"

"ມາຄັນທິຍະ ເຮົາກໍແນວນັ້ນຄືກັນ ຫາກຈະເພິ່ງສະແດງທຳແກ່ທ່ານວ່າ "ຄວາມບໍ່ມີພະຍາດນັ້ນຄືອັນນີ້ ນິບພານນັ້ນຄືອັນນີ້" ທ່ານນັ້ນຍັງບໍ່ຮູ້ຄວາມບໍ່ມີພະຍາດ ຍັງບໍ່ເຫັນນິບພານ ມີແຕ່ເຮັດໃຫ້ເຮົາເມື່ອຍລ່າເປົ່າ ລຳບາກເປົ່າ"

"ຂ້າພຣະອົງເຫຼື້ອມໃສທ່ານພຣະໂຄດົມແນວນີ້ ທ່ານພຣະໂຄດົມຊົງສາມາດສະແດງທຳແກ່ຂ້າພຣະອົງ ໂດຍວິທີທີ່ຂ້າພຣະອົງຈະຮູ້ຄວາມບໍ່ມີພະຍາດ ແລະເຫັນພຣະນິບພານໄດ້"

[໔໘໐] "ມາຄັນທິຍະ ປຽບຄືຄົນຕາບອດມາແຕ່ກຳເນີດ ເຂົາບໍ່ໄດ້ເຫັນຮູບ ສີດຳ ຮູບສີຂາວ ຮູບສີຂຽວ ຮູບສີເຫຼືອງ ຮູບສີແດງ ຮູບສີແສດ ບໍ່ໄດ້ເຫັນທີ່ອັນສະເໝີແລະ ບໍ່ສະເໝີ ບໍ່ໄດ້ເຫັນດວງດາວ ບໍ່ໄດ້ເຫັນດວງຈັນແລະດວງອາທິດ ແຕ່ເຂົາໄດ້ຟັງຈາກຄົນຕາດີຜູ້ກ່າວວ່າ "ພໍ່ທ່ານ ຜ້າຂາວຜ່ອງງົດງາມຍິ່ງ ບໍ່ສົກກະປົກ ສະອາດສະອ້ານ"

ຄົນຕາບອດມາແຕ່ກຳເນີດນັ້ນທ່ຽວສະແຫວງຫາຜ້າຂາວ ຊາຍຄົນໜຶ່ງເອົາຜ້າຊີ້ນຫຍາບເປື້ອນນ້ຳມັນມາລວງເຂົາວ່າ "ພໍ່ທ່ານ ຜ້າຜືນນີ້ຂາວຜ່ອງງົດງາມຍິ່ງ ບໍ່ສົກກະປົກ ສະອາດສະອ້ານ ເປັນຂອງທ່ານ"

ເຂົາຮັບຜ້ານັ້ນມາຫົ່ມ ມິດ ອຳມາດ ຍາດສາໂລຫິດຂອງເຂົາເຊີນແພດຜູ້ຊ່ຽວຊານການປາດມາຖືຮັກສາ ແພດຜູ້ຊ່ຽວຊານນັ້ນເຮັດຢາຖອນໃຫ້ ເຮັດຢາຖ່າຍ ຢາຢອດ ຢາທາ ແລະຢານັດຖຸ່ໃຫ້ ເຂົາອາໄສຢານັ້ນຈຶ່ງເຫັນໄດ້ ເຮັດຕາໃຫ້ໃສໄດ້ ພ້ອມກັບມີຕາດີຂຶ້ນ ເຂົາຍ່ອມ ລະຄວາມພໍໃຈ ແລະ ຄວາມຍິນດີໃນຜ້າຊິ້ນຫຍາບເປື້ອນນ້ຳມັນຜືນນັ້ນ ເຂົາຈະເພິ່ງບຽດບຽນ ບຸຣຸດທີ່ລວງຕົນນັ້ນ ໂດຍຄວາມເປັນສັດຕູເປັນຂ້າເສິກ ແລະ ຈະເພິ່ງສຳຄັນວ່າຄວນປົງຊີວິດບຸຣຸດທີ່ລວງຕົນນັ້ນດ້ວຍຄວາມແຄ້ນວ່າ "ເຮົາຖືກບຸຣຸດຜູ້ນີ້ລໍ້ລວງໃຫ້ຫລົງຜິດດ້ວຍຜ້າຊິ້ນຫຍາບເປື້ອນນ້ຳມັນວ່າ "ພໍ່ທ່ານ ຜ້າຜືນນີ້ຂາວຜ່ອງງົດງາມຍິ່ງ ບໍ່ສົກກະປົກ ສະອາດສະອ້ານ ເປັນຂອງທ່ານ" ແມ່ນສັນໃດ

ມາຄັນທິຍະ ເຮົາກໍສັນນັ້ນຄືກັນ ຫາກຈະເພິ່ງສະແດງທຳແກ່ທ່ານວ່າ "ຄວາມບໍ່ມີພະຍາດນັ້ນຄືອັນນີ້ ນິບພານນັ້ນຄືນີ້" ທ່ານນັ້ນຈະເພິ່ງຮູ້ຄວາມບໍ່ມີພະຍາດ ຈະເພິ່ງເຫັນນິບພານໄດ້ ທ່ານກໍຈະລະຄວາມພໍໃຈແລະຄວາມຍິນດີໃນອຸປາທານຂັນ ໕ ປະການ ພ້ອມກັບເກີດດວງຕາຄືປັນຍາຂຶ້ນ ອັນໜຶ່ງ ທ່ານຈະເພິ່ງມີຄວາມຄິດແບບນີ້ວ່າ "ທ່ານຜູ້ຈະເລີນ ເຮົາຖືກຈິດນີ້ລໍ້ລວງໃຫ້ຫລົງຜິດມາດົນແລ້ວ ເຮົາເມື່ອຍຶດໝັ້ນກໍຍຶດໝັ້ນສະເພາະຮູບ ສະເພາະ ເວທະນາ ສະເພາະສັນຍາ ສະເພາະສັງຂານ ແລະສະເພາະວິນຍານທໍ່ນັ້ນ ຍ້ອນອຸປາທານ ເປັນປັດໄຈ ພົບຈຶ່ງມີແກ່ເຮົາ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດຈຶ່ງມີ ຄວາມເກີດແຫ່ງກອງທຸກ ທັງໝົດນີ້ຍ່ອມມີດ້ວຍປະການແບບນີ້"

"ຂ້າພຣະອົງເຫຼື້ອມໃສທ່ານພຣະໂຄດົມແບບນີ້ ທ່ານພຣະໂຄດົມຊົງສາມາດສະແດງທຳແກ່ຂ້າພຣະອົງ ໂດຍວິທີທີ່ຂ້າພຣະອົງຈະບໍ່ເປັນຄົນຕາບອດລຸກຂຶ້ນຈາກອາສະນະນີ້ໄດ້"

[໒໑໗] "ມາຄັນທິຍະ ຖ້າເຊັ່ນນັ້ນ ທ່ານຈົ່ງຄົບສັດຕະບຸຣຸດ ຍ້ອນເມື່ອໃດທ່ານຄົບ ສັດຕະບຸຣຸດ ເມື່ອນັ້ນທ່ານຈະໄດ້ຟັງທຳຂອງສັດຕະບຸຣຸດ ເມື່ອໃດທ່ານໄດ້ຟັງທຳຂອງສັດຕະບຸຣຸດ ເມື່ອນັ້ນທ່ານກໍຈັກປະຕິບັດທຳສົມຄວນແກ່ທຳ ເມື່ອໃດທ່ານປະຕິບັດທຳສົມຄວນແກ່ທຳ ເມື່ອນັ້ນທ່ານກໍຈັກຮູ້ເອງ ເຫັນເອງວ່າ "ພະຍາດ ຝີ ລູກສອນ ຄືອັນນີ້ ພະຍາດ ຝີ ລູກສອນ ຈະດັບໄປໄດ້ໂດຍບໍ່ເຫຼືອໃນບ່ອນນີ້ ຍ້ອນອຸປາທານຂອງເຮົານັ້ນດັບ ພົບຈຶ່ງດັບ ຍ້ອນພົບດັບ ຊາດຈຶ່ງດັບ ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດ ຈຶ່ງດັບ ຄວາມດັບແຫ່ງກອງທຸກທັງໝົດນີ້ຍ່ອມມີດ້ວຍປະການແບບນີ້"

## ມາຄັນທິຍະໄດ້ບັນພະຊາອຸປະສົມບົດ

[໒໑໘] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແບບນີ້ແລ້ວ ມາຄັນທິຍປະຣິພາຊົກໄດ້ຂາບທູນ

ພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ເປີດຂອງທີ່ອັດ ບອກທາງແກ່ຜູ້ຫລົງທາງ ຫຼືເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂ້າພຣະອົງເພິ່ງໄດ້ບັນພະຊາອຸປະສົມບົດໃນສຳນັກຂອງທ່ານພຣະໂຄດົມເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມາຄັນທິຍະ ຜູ້ເຄີຍເປັນອັນຍະເດຍຣະຖີປະສົງຈະ ບັນພະຊາອຸປະສົມບົດໃນທຳວິໄນນີ້ ຈະຕ້ອງຢູ່ປະຣິວາດ ໔ ເດືອນ ຫລັງຈາກ ໔ ເດືອນ ລ່ວງໄປແລ້ວ ເມື່ອພິກຂຸທັງຫລາຍເຕັມໃຈຈຶ່ງຈະໃຫ້ບັນພະຊາອຸປະສົມບົດເປັນພິກຂຸໄດ້ ແຕ່ເຮົາຮູ້ຄວາມແຕກຕ່າງຂອງບຸກຄົນໃນເລື້ອງນີ້"

ມາຄັນຖີຍປະຣິພາຊົກ ໄດ້ຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຖ້າຜູ້ເຄີຍເປັນ ອັນຍະເດຍຣະຖີ ປະສົງຈະບັນພະຊາອຸປະສົມບົດໃນພຣະທຳວິໄນນີ້ ຈະຕ້ອງຢູ່ປະຣິວາດ ໔ ເດືອນ ຫລັງຈາກ ໔ ເດືອນລ່ວງໄປແລ້ວ ເມື່ອພິກຂຸທັງຫລາຍເຕັມໃຈຈຶ່ງຈະໃຫ້ບັນພະຊາ ອຸປະສົມບົດເປັນພິກຂຸໄດ້ ຂ້າພຣະອົງຈັກຂໍຢູ່ປະຣິວາດ ໔ ປີ ຫລັງຈາກ ໔ ປີລ່ວງໄປແລ້ວ ເມື່ອພິກຂຸທັງຫລາຍເຕັມໃຈກໍຈົ່ງໃຫ້ບັນພະຊາອຸປະສົມບົດເປັນພິກຂຸເທີ້ນ"

ມາຄັນຖີຍປະຣິພາຊົກໄດ້ບັນພະຊາອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວ ທ່ານພຣະມາຄັນທິຍະອຸປະສົມບົດແລ້ວບໍ່ດົນ ຫລີກອອກໄປຢູ່ຜູ້ດຽວ ເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດກໍເຮັດໃຫ້ແຈ້ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ຕ້ອງການດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ເປັນອັນວ່າ ທ່ານພຣະມາຄັນທິຍະໄດ້ເປັນພຣະອະຣະຫັນອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫລາຍ ດັ່ງນີ້ແລ

**ມາຄັນທິຍະສູດທີ່ ໔ ຈົບ**

# ៧. ສັນທະກະສູດ

## ວ່າດ້ວຍປະຣິພາຊົກຊື່ສັນທະກະ

[໔໔໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ໂຄສິຕາຣາມ ເຂດນະຄອນໂກສຳພີ ສະໄໝນັ້ນແລ ປະຣິພາຊົກຊື່ສັນທະກະກັບໝູ່ປະຣິພາຊົກປະມານ ໕໐໐ ຄົນ ພ້ອມດ້ວຍປະຣິພາຊົກບໍລິສັດໝູ່ໃຫຍ່ອາໄສຢູ່ທີ່ຖ້ຳປິລັກຂະ (ຖ້ຳໄມ້ໝາກເດື່ອ) ເມື່ອເວລາແລງ ທ່ານພຣະອານົນອອກຈາກທີ່ຫຼີບຫຼີກ໑ແລ້ວຮຽກພິກຂຸທັງຫລາຍມາກ່າວວ່າ "ທ່ານຜູ້ມີອາຍຸທັງຫລາຍ ເຮົາທັງຫລາຍຈະເຂົ້າໄປສູ່ບໍ່ນ້ຳຝົນເຊາະເພື່ອຈະເບິ່ງຖ້ຳ"

ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ລຳດັບນັ້ນ ທ່ານພຣະອານົນພ້ອມດ້ວຍພິກຂຸຈຳນວນຫຼາຍ ໄດ້ເຂົ້າໄປສູ່ບໍ່ນ້ຳຝົນເຊາະ

### ເດຍຣັດສານກະຖາ

ສະໄໝນັ້ນ ສັນທະກປະຣິພາຊົກກຳລັງນັ່ງຢູ່ກັບປະຣິພາຊົກບໍລິສັດໝູ່ໃຫຍ່ຜູ້ກຳລັງສົນທະນາເຖິງເດຍຣັດສານກະຖາ໔ຕ່າງ ໆ ດ້ວຍສຽງດັງອື້ອຶງ ຄື ເວົ້າເລື້ອງພຣະຣາຊາ ເລື້ອງໂຈນ ເລື້ອງ ມະຫາອຳມາດ ເລື້ອງກອງທັບ ເລື້ອງໄພ ເລື້ອງການຮົບ ເລື້ອງເຂົ້າ ເລື້ອງນ້ຳເລື້ອງຜ້າ ເລື້ອງ ທີ່ນອນ ເລື້ອງພວງດອກໄມ້ ເລື້ອງຂອງຫອມ ເລື້ອງຍາດ ເລື້ອງຍານ ເລື້ອງເຮືອນ ເລື້ອງນິຄົມ ເລື້ອງເມືອງຫລວງ ເລື້ອງຊົນນະບົດ ເລື້ອງສະຕີ (ເລື້ອງບຸຣຸດ) ເລື້ອງຄົນກ້າຫານ ເລື້ອງຮ່ອມ ເລື້ອງທ່ານ້ຳ ເລື້ອງຄົນທີ່ລ່ວງລັບໄປແລ້ວ ເລື້ອງຕ່າງ ໆ ເລື້ອງໂລກເລື້ອງທະເລ ເລື້ອງຄວາມຈະເລີນແລະຄວາມເສື່ອມແນວນັ້ນ ໆ ສັນທະກປະຣິພາຊົກໄດ້ເຫັນທ່ານພຣະອານົນກຳລັງຍ່າງມາແຕ່ໄກ ຈຶ່ງຫ້າມບໍລິສັດຂອງຕົນວ່າ

"ທ່ານທັງຫລາຍ ໂຜດງຽບນອຍ ຢ່າສົ່ງສຽງອື້ອຶງ ນີ້ຄືສາວົກຂອງພຣະ ສະມະໜະໂຄດົມຊື່ວ່າອານົນກຳລັງຍ່າງມາ ທ່ານເປັນສາວົກຮູບໜຶ່ງບັນດາສາວົກຂອງພຣະ ສະມະໜະໂຄດົມຜູ້ອາໄສຢູ່ທີ່ນະຄອນໂກສຳພີ ທ່ານເຫຼົ່ານັ້ນຊອບສຽງເບົາ ແນະນຳໃຫ້ເວົ້າກັນ ເບົາ ໆ ກ່າວສັນເສີນສຽງເບົາ ບາງເທື່ອທ່ານອານົນຮູ້ວ່າບໍລິສັດສຽງເບົາ ທ່ານ ອາດຈະເຂົ້າມາກໍໄດ້"

ລຳດັບນັ້ນ ປະຣິພາຊົກເຫຼົ່ານັ້ນຈຶ່ງໄດ້ພາກັນນິ່ງ

## ພຣະອານົນກ່າວທຳມີກະຖາ

[໘໘໔] ຄັ້ງນັ້ນ ທ່ານພຣະອານົນໄດ້ເຂົ້າໄປຫາສັນທະກປະຣິພາຊົກຮອດບ່ອນຢູ່ ສັນທົກ ປະຣິພາຊົກຈຶ່ງກ່າວເຊື້ອເຊີນວ່າ "ທ່ານພຣະອານົນ ຂໍເຊີນທ່ານພຣະອານົນເຂົ້າມາເທີ້ນ ຂໍຕ້ອນ ຮັບຢູ່ດົນ ໆ ທ່ານພຣະອານົນຈະມີເວລາມາທີ່ນີ້ ຂໍເຊີນທ່ານພຣະອານົນຈົ່ງນັ່ງເທີ້ນ ອາສະນະນີ້ ທີ່ປູລາດໄວ້ແລ້ວ ຂ້ານ້ອຍ"

ທ່ານພຣະອານົນຈຶ່ງນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ ແມ່ນສັນທະກປະຣິພາຊົກກໍ ເລືອກນັ່ງຢູ່ບ່ອນທີ່ສົມຄວນທີ່ໃດທີ່ໜຶ່ງ ເຊິ່ງຕ່ຳກວ່າທ່ານພຣະອານົນໄດ້ຖາມສັນທະກປະຣິພາຊົກ ວ່າ "ສັນທະກະ ບັດນີ້ ທ່ານທັງຫລາຍນັ່ງປະຊຸມສົນທະນາກັນດ້ວຍເລື້ອງອັນໃດ ເລື້ອງອັນໃດທີ່ ທ່ານ ທັງຫລາຍສົນທະນາກັນຄ້າງໄວ້"

"ທ່ານພຣະອານົນ ເລື້ອງທີ່ຂ້າພະເຈົ້າທັງຫລາຍນັ່ງປະຊຸມສົນທະນາກັນໃນເວລານີ້ຂໍ ງົດ ໄວ້ກ່ອນເທີ້ນ ເລື້ອງນັ້ນທ່ານພຣະອານົນຈັກຟັງໄດ້ໃນພາຍຫລັງໂດຍບໍ່ຍາກ ດີແລ້ວ ຂໍທ່ານ ພຣະອານົນຈົ່ງສະແດງທຳມີກະຖາໃນລັດທິອາຈານຂອງຕົນໃຫ້ແຈ້ງຊັດເທີ້ນ"

"ຖ້າເຊັ່ນນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ສັນທະກປະຣິພາຊົກຮັບຄຳແລ້ວ ທ່ານພຣະອານົນໄດ້ກ່າວວ່າ "ສັນທະກະ ລັດທິອັນ ບໍ່ ແມ່ນການປະພຶດພົມມະຈັນ ໔ ລັດທິນີ້ ແລະ ພົມມະຈັນທີ່ບໍ່ໜ້າໄວ້ວາງໃຈ ໔ ປະການ ທີ່ວິນຍູ ຊົນບໍ່ເພິ່ງຢູ່ປະພຶດເລີຍ ເຖິງເມື່ອຢູ່ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດບໍ່ໄດ້ ທີ່ພຣະຜູ້ມີພຣະພາກ ເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດໄວ້ແລ້ວ"

ສັນທະກະປະຣິພາຊົກຖາມວ່າ "ທ່ານພຣະອານົນ ລັດທິອັນບໍ່ແມ່ນການປະພຶດ ພົມມະ ຈັນ ໔ ລັດທິ ທີ່ວິນຍູຊົນບໍ່ເພິ່ງຢູ່ປະພຶດເລີຍ ເຖິງເມື່ອຢູ່ກໍທຳກຸສົນທຳ ທີ່ຖືກຕ້ອງໃຫ້ສຳເລັດບໍ່ ໄດ້ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳ ພຸດທະເຈົ້າ ຕັດໄວ້ແລ້ວນັ້ນ ເປັນແນວໃດ?"

## ລັດທິອັນບໍ່ແມ່ນການປະພຶດພົມມະຈັນ

[໘໘໕] ທ່ານພຣະອານົນຕອບວ່າ "ສັນທະກະ ສາດສະດາບາງທ່ານໃນໂລກນີ້ ຜູ້ມີ ວາ ທະແນວນີ້ ມີທິດຖິແນວນີ້ວ່າ "ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການ ເຊັ່ນສຣວງ ກໍບໍ່ມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີເຮັດຊົ່ວກໍບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ມານດາບໍ່ມີຄຸນ ບິ ດາບໍ່ມີຄຸນ ໂອປະປາຕິກະສັດກໍບໍ່ມີ ສະມະນະພາມຜູ້ປະພຶດ ປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງກໍບໍ່ມີໃນໂລກ ມະນຸດຄືທີ່ປະຊຸມ

ແຫ່ງມະຫາພູຕະຮູບ ໔ ເມື່ອສິ້ນຊີວິດ ທາດດິນໄປຕາມ ທາດດິນ ທາດນໍ້າໄປຕາມທາດນໍ້າ ທາດໄຟໄປຕາມທາດໄຟ ທາດລົມໄປຕາມທາດລົມ ອິນຊີທັງຫລາຍຍ່ອມຜັນແປໄປເປັນອາກາດ ສະທາດມະນຸດມີຕຽງນອນເປັນທີ່ ໕ ນຳສົບໄປ໑ ຮ່າງກາຍຜາກົດຢູ່ແຄ່ປ່າຊ້າ ກາຍເປັນກະດູກ ຂາວໂພລນຄືສີນົກພິຮາມ ການເຊ່ນສຮວງສິ້ນສຸດລົງແຄ່ເທົ່າຖ່ານ ຄົນຈ້າບັນຍັດທານນີ້ໄວ້ ຄຳທີ່ ຄົນລາງພວກຢໍ້າວ່າມີຜົນນັ້ນ ວ່າງເປົ່າ ຕົວະ ຂາດສາລະ ເມື່ອສິ້ນຊີວິດບໍ່ວ່າຄົນຈ້າຫຼືຄົນ ສະຫຼາດຍ່ອມຂາດສູນບໍ່ເກີດອີກ"

ໃນລັດທິຂອງສາດສະດານັ້ນ ວິນຍູຊົນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ "ທ່ານສາດສະດາ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການເຊ່ນສ ຮວງກໍບໍ່ມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີເຮັດຊົ່ວກໍບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ໂອປະປາຕິກະສັດກໍບໍ່ມີ ສະມະນະພາມຜູ້ປະພຶດປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນໃຫ້ຜູ້ອື່ນຮູ້ແຈ້ງກໍບໍ່ມີໃນໂລກ ມະນຸດຄືທີ່ປະຊຸມ ແຫ່ງມະຫາພູຕະຮູບ ໔ ເມື່ອສິ້ນຊີວິດ ທາດດິນໄປຕາມ ທາດດິນ ທາດນໍ້າໄປຕາມທາດນໍ້າ ທາດໄຟໄປຕາມທາດໄຟ ທາດລົມໄປຕາມທາດລົມ ອິນຊີທັງຫລາຍຍ່ອມຜັນແປໄປເປັນອາກາດ ສະທາດມະນຸດມີຕຽງນອນເປັນທີ່ ໕ ນຳສົບໄປ ຮ່າງກາຍຜາກົດຢູ່ແຄ່ປ່າຊ້າ ກາຍເປັນກະດູກ ຂາວໂພລນຄືສີນົກພິຮາມ ການເຊ່ນສຮວງສິ້ນສຸດລົງແຄ່ເທົ່າຖ່ານ ຄົນຈ້າບັນຍັດທານນີ້ໄວ້ ຄຳທີ່ ຄົນລາງພວກຢໍ້າວ່າມີຜົນນັ້ນ ວ່າງເປົ່າ ຕົວະ ຂາດສາລະ ເມື່ອສິ້ນຊີວິດບໍ່ວ່າຄົນຈ້າຫຼືຄົນ ສະຫຼາດ ຍ່ອມຂາດສູນບໍ່ ເກີດອີກ"

ຖ້າຄຳຂອງທ່ານສາດສະດານີ້ເປັນຈິງ ໃນລັດທິນີ້ກຳທີ່ເຮົາບໍ່ໄດ້ເຮັດເລີຍຊື່ວ່າເປັນອັນ ເຮັດແລ້ວ ພົມມະຈັນທີ່ເຮົາບໍ່ໄດ້ຢູ່ປະພຶດເລີຍ ຊື່ວ່າເປັນອັນຢູ່ປະພຶດແລ້ວ ແມ່ນເຮົາ ທັງສອງຊື່ ວ່າເປັນຜູ້ສະເໝີ ໆ ກັນ ແລະ ເຖິງຄວາມເທົ່າທຽມກັນໃນລັດທິນີ້ ແຕ່ເຮົາບໍ່ກ່າວວ່າ "ຫລັງຈາກ ຕາຍແລ້ວ ແມ່ນເຮົາທັງສອງກໍຈັກຂາດສູນ ບໍ່ເກີດອີກ" ການທີ່ທ່ານສາດສະດານີ້ເປັນ ຜູ້ປະພຶດ ເປືອຍກາຍ ເປັນຄົນຫົວໂລ້ນ ທຳຄວາມພຽນໃນການຍ່າງແຍ່ງແຍ້ ລົກຜົມແລະໜວດ ເປັນການ ປະຕິບັດເກີນໄປ ເຮົາເມື່ອອະຢູ່ຄອງເຮືອນນອນບຽດສຽດກັບບຸດພັນລະຍາ ປະພົມຜົງແກ່ນຈັນ ເມືອງກາສີ ທັດຊົງດອກໄມ້ຂອງຫອມແລະເຄື່ອງ ລູບໄລ້ ຍິນດີຄຳແລະເງິນຢູ່ ຈຶ່ງເປັນຜູ້ມີຄະຕິ ສະເໝີ ໆ ກັນກັບທ່ານສາດສະດານີ້ ເຮົານັ້ນ ຮູ້ອັນໃດ ເຫັນອັນໃດຢູ່ ຈຶ່ງຈັກປະພຶດພົມມະຈັນ ໃນສາດສະດານີ້ ວິນຍູຊົນນັ້ນຮູ້ດັ່ງນີ້ວ່າ "ລັດທິນີ້ບໍ່ແມ່ນການປະພຶດພົມມະຈັນ" ຍ່ອມເບື່ອໜ່າຍ ຫລີກໄປຈາກພົມມະຈັນນັ້ນ

ສັນທະກະ ລັດທິນີ້ບໍ່ແມ່ນການປະພຶດພົມມະຈັນ ທີ່ວິນຍູຊົນບໍ່ເພິ່ງຢູ່ປະພຶດເລີຍ ເຖິງ ເມື່ອຢູ່ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດບໍ່ໄດ້ ເປັນລັດທິທີ່ ໑ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງ ນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດໄວ້ແລ້ວ

[໔໘໖] ສັນທະກະ ອີກປະການໜຶ່ງ ສາດສະດາລາງຄົນໃນໂລກນີ້ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ຜູ້ອື່ນເຮັດ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດ ບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຮັດໃຫ້ເສົ້າໂສກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ເສົ້າໂສກ ເຮັດໃຫ້ລຳບາກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ລຳບາກ ດີ້ນຮົນເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ດີ້ນຮົນ ຂ້າສັດ ຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ເຈາະປ່ອງຈອບລັກ ປຸ້ນເຮືອນຫລັງດຽວ ດັກຈີ້ໃນ ທາງປ່ຽວ ເປັນຊູ້ເວົ້າຕົວະ ຜູ້ເຮັດ(ເຊັ່ນນັ້ນ)ກໍບໍ່ຈັດວ່າເຮັດບາບ

ແມ່ນຫາກບຸກຄົນໃຊ້ຈັກມີຄົມຄືມີດແຖສັງຫານເຫຼົ່າສັດໃນປະຖະພີນີ້ໃຫ້ເປັນຄືລານຕາກຊີ້ນ ໃຫ້ເປັນກອງຊີ້ນດຽວກັນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກຳນັ້ນ ບໍ່ມີບາບ ມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຂວາແມ່ນ້ຳຄົງຄາ ຂ້າເອງ ໃຊ້ໃຫ້ຜູ້ອື່ນຂ້າ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກຳນັ້ນ ບໍ່ມີບາບມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຊ້າຍແມ່ນ້ຳຄົງຄາ ໃຫ້ເອງ ໃຊ້ໃຫ້ຜູ້ອື່ນໃຫ້ ບູຊາເອງ ໃຊ້ໃຫ້ ຜູ້ອື່ນບູຊາ ເຂົາຍ່ອມບໍ່ມີບຸນທີ່ເກີດຈາກກຳນັ້ນ ບໍ່ມີບຸນມາເຖິງເຂົາ ບໍ່ມີບຸນທີ່ເກີດຈາກການໃຫ້ທານຈາກການເຝິກອິນຊີ ຈາກການສັງລວມ ແລະ ຈາກການເວົ້າຄຳສັດ ບໍ່ມີ ບຸນມາເຖິງເຂົາ"

ໃນລັດທິຂອງສາດສະດານັ້ນ ວິນຍູຊົນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ "ທ່ານສາດສະດາຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ຜູ້ອື່ນເຮັດ ຕັດເອງ ໃຊ້ໃຫ້ ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຮັດໃຫ້ເສົ້າໂສກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ ເສົ້າໂສກ ເຮັດໃຫ້ລຳບາກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ລຳບາກ ດີ້ນຮົນເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ດີ້ນຮົນຂ້າສັດ ຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ເຈາະປ່ອງຈອບລັກ ປຸ້ນເຮືອນຫລັງດຽວ ດັກຈີ້ໃນທາງປ່ຽວ ເປັນຊູ້ ເວົ້າຕົວະ ຜູ້ເຮັດ(ເຊັ່ນນັ້ນ)ກໍບໍ່ຈັດວ່າເຮັດບາບ

ແມ່ນຫາກບຸກຄົນໃຊ້ຈັກມີຄົມ ຄື ມີດແຖສັງຫານເຫຼົ່າສັດໃນປະຖະພີນີ້ໃຫ້ເປັນຄືລານຕາກຊີ້ນ ໃຫ້ເປັນກອງຊີ້ນດຽວກັນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກຳນັ້ນ ບໍ່ມີບາບ ມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຂວາແມ່ນ້ຳຄົງຄາ ຂ້າເອງ ໃຊ້ໃຫ້ຜູ້ອື່ນຂ້າ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກຳນັ້ນ ບໍ່ມີບາບມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຊ້າຍແມ່ນ້ຳຄົງຄາ ໃຫ້ເອງ ໃຊ້ໃຫ້ຜູ້ອື່ນໃຫ້ ບູຊາເອງ ໃຊ້ໃຫ້ຜູ້ອື່ນບູຊາ ເຂົາຍ່ອມບໍ່ມີບຸນທີ່ເກີດຈາກກຳນັ້ນ ບໍ່ມີບຸນມາເຖິງເຂົາ ບໍ່ມີບຸນທີ່ເກີດຈາກການໃຫ້ທານ

ຈາກການເຝິກອິນຊີ ຈາກການສັງລວມ ແລະຈາກການເວົ້າຄຳສັດ ບໍ່ມີບຸນມາເຖິງເຂົາ”

ຖ້າຄຳຂອງທ່ານສາດສະດານີ້ເປັນຈິງ ໃນລັດທິນີ້ກຳທີ່ເຮົາບໍ່ໄດ້ເຮັດເລີຍຊື່ວ່າເປັນອັນເຮັດແລ້ວ ພົມມະຈັນທີ່ເຮົາບໍ່ໄດ້ຢູ່ປະພຶດເລີຍ ຊື່ວ່າເປັນອັນຢູ່ປະພຶດແລ້ວ ແມ່ນເຮົາ ທັງສອງຊື່ວ່າເປັນຜູ້ສະເໝີ ໆ ກັນ ແລະເຖິງຄວາມເທົ່າທຽມກັນໃນລັດທິນີ້ ແຕ່ເຮົາບໍ່ກ່າວວ່າ “ຫລັງຈາກຕາຍແລ້ວ ແມ່ນເຮົາທັງສອງກໍຈັກຂາດສູນ ບໍ່ເກີດອີກ” ການທີ່ທ່ານສາດສະດານີ້ເປັນຜູ້ປະພຶດເປືອຍກາຍ ເປັນຄົນຫົວໂລ້ນ ທຳຄວາມພຽນໃນການຍ່າງແຍ່ງແຍ້ ລົກຜົມແລະໜວດ ເປັນການປະຕິບັດເກີນໄປ ເຮົາເມື່ອອະຢູ່ຄອງເຮືອນນອນບຽດສຽດກັບບຸດພັນລະຍາ ປະພົມຜົງແກ່ນຈັນເມືອງກາສີ ທັດຊົງດອກໄມ້ຂອງຫອມແລະເຄື່ອງລູບໄລ້ ຍິນດີຄຳແລະເງິນຢູ່ ຈຶ່ງເປັນຜູ້ມີຄະຕິສະເໝີ ໆ ກັນກັບທ່ານສາດສະດານີ້ໃນພົບໜ້າໄດ້ ເຮົານັ້ນຮູ້ອັນໃດເຫັນອັນໃດຢູ່ຈຶ່ງຈັກປະພຶດພົມມະຈັນໃນສາດສະດານີ້ ວິນຍູຊົນນັ້ນຮູ້ດັ່ງນີ້ວ່າ “ລັດທິນີ້ບໍ່ແມ່ນການປະພຶດພົມມະຈັນ” ຍ່ອມເບື່ອໜ່າຍຫລີກໄປຈາກພົມມະຈັນນັ້ນ

ສັນທະກະ ລັດທິນີ້ບໍ່ແມ່ນການປະພຶດພົມມະຈັນ ທີ່ວິນຍູຊົນບໍ່ເພິ່ງຢູ່ປະພຶດເລີຍ ເຖິງເມື່ອຢູ່ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດບໍ່ໄດ້ ເປັນລັດທິທີ່ ໔ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດໄວ້ແລ້ວ

[໔໔໗] ສັນທະກະ ອີກປະການໜຶ່ງ ສາດສະດາລາງຄົນໃນໂລກນີ້ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ “ຄວາມເສົ້າໝອງຂອງສັດທັງຫລາຍບໍ່ມີເຫດ ບໍ່ມີປັດໄຈ ສັດທັງຫລາຍ ເສົ້າໝອງເອງ ຄວາມບໍລິສຸດຂອງສັດທັງຫລາຍ ບໍ່ມີເຫດ ບໍ່ມີປັດໄຈ ສັດທັງຫລາຍບໍລິສຸດເອງ ບໍ່ມີກຳລັງ ບໍ່ມີຄວາມພຽນ ບໍ່ມີຄວາມສາມາດຂອງມະນຸດ ບໍ່ມີຄວາມພະຍາຍາມຂອງມະນຸດ ສັດປານະ ພູຕະ ຊີວະທັງປວງ ລ້ວນບໍ່ມີອຳນາດ ບໍ່ມີກຳລັງ ບໍ່ມີຄວາມພຽນ ຜັນແປໄປຕາມໂຊກຊະຕາ ຕາມສະຖານພາບທາງສັງຄົມແລະຕາມລັກສະໃນສະເພາະຕົນ ຍ່ອມສະເຫວີຍສຸກແລະທຸກໃນອະພິຊາດທັງ ໖

ໃນລັດທິຂອງສາດສະດານັ້ນ ວິນຍູຊົນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ “ທ່ານສາດສະດາຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ “ຄວາມເສົ້າໝອງຂອງສັດທັງຫລາຍ ບໍ່ມີເຫດ ບໍ່ມີປັດໄຈ ສັດທັງຫລາຍເສົ້າໝອງເອງ ຄວາມບໍລິສຸດຂອງສັດທັງຫລາຍ ບໍ່ມີເຫດ ບໍ່ມີ ປັດໄຈ ສັດທັງຫລາຍບໍລິສຸດເອງ ບໍ່ມີກຳລັງ ບໍ່ມີຄວາມພຽນ ບໍ່ມີຄວາມສາມາດຂອງມະນຸດ ບໍ່ມີຄວາມພະຍາຍາມຂອງມະນຸດ ສັດ ປານະ ພູຕະ ຊີວະທັງປວງ ລ້ວນບໍ່ມີອຳນາດ ບໍ່ມີກຳລັງ ບໍ່ມີຄວາມພຽນຜັນແປໄປຕາມໂຊກຊະຕາ ຕາມສະຖານພາບທາງສັງຄົມ ແລະ ຕາມລັກສະນະສະເພາະຕົນຍ່ອມສະເຫວີຍສຸກ ແລະ ທຸກໃນອະພິຊາດທັງ ໖”

ຖ້າຄຳຂອງທ່ານສາດສະດານີ້ເປັນຈິງ ໃນລັດທິນີ້ກຳທີ່ເຮົາບໍ່ໄດ້ເຮັດເລີຍຊື່ວ່າເປັນອັນ

ເຮັດແລ້ວ ພົນມະຈັນທີ່ເຮົາບໍ່ໄດ້ຢູ່ປະພຶດເລີຍ ຊື່ວ່າເປັນອັນຢູ່ປະພຶດແລ້ວ ແມ່ນເຮົາ ທັງສອງຊື່ວ່າເປັນຜູ້ສະເໝີ ໆ ກັນ ແລະ ເຖິງຄວາມເທົ່າທຽມກັນໃນລັດທິນີ້ ແຕ່ເຮົາບໍ່ກ່າວວ່າ "ຫລັງຈາກຕາຍແລ້ວ ແມ່ນເຮົາທັງສອງກໍຈັກຂາດສູນ ບໍ່ເກີດອີກ" ການທີ່ທ່ານສາດສະດານີ້ເປັນຜູ້ປະພຶດເປືອຍກາຍ ເປັນຄົນຫົວໂລ້ນ ທຳຄວາມພຽນໃນການຍ່າງແຍ່ງແຍ້ ລົກຜົມແລະໜວດ ເປັນການປະຕິບັດເກີນໄປ ເຮົາເມື່ອອະຍູ່ຄອງເຮືອນນອນບຽດສຽດກັບບຸດພັນລະຍາ ປະພົມຜີງແກ່ນຈັນເມືອງກາສີ ທັດຊົງດອກໄມ້ຂອງຫອມແລະເຄື່ອງລູບໄລ້ ຍິນດີຄຳແລະເງິນຢູ່ ຈັກເປັນຜູ້ມີຄະຕິສະເໝີ ໆ ກັນກັບທ່ານສາດສະດານີ້ໃນພົບໜ້າໄດ້ ເຮົານັ້ນຮູ້ອັນໃດ ເຫັນອັນໃດຢູ່ ຈຶ່ງຈັກປະພຶດພົມມະຈັນໃນສາດສະດານີ້ ວິນຍູຊົນນັ້ນຮູ້ດັ່ງນີ້ວ່າ "ລັດທິນີ້ບໍ່ແມ່ນການປະພຶດພົມມະຈັນ" ຍ່ອມເບື່ອໜ່າຍຫລີກໄປຈາກພົມມະຈັນນັ້ນ

ສັນທະກະ ລັດທິນີ້ບໍ່ແມ່ນການປະພຶດພົມມະຈັນ ທີ່ວິນຍູຊົນບໍ່ເພິ່ງຢູ່ປະພຶດເລີຍ ເຖິງເມື່ອຢູ່ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດບໍ່ໄດ້ ເປັນລັດທິທີ່ ໖ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດໄວ້ແລ້ວ

[໔໔໗] ສັນທະກະ ອີກປະການໜຶ່ງ ສາດສະດາລາງຄົນໃນໂລກນີ້ ຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ "ສະພາວະ ໗ ກອງນີ້ ບໍ່ມີຜູ້ສ້າງ ບໍ່ມີຜູ້ບັນດານ ບໍ່ມີຜູ້ເນຣະມິດ ບໍ່ມີ ຜູ້ໃຫ້ເນຣະມິດ ໝັ້ນຍືນໝັ້ນຄົງຄືຍອດພູ ຄືເສົາຣະນຽດ ບໍ່ຫວັ່ນໄຫວ ບໍ່ຜັນແປ ບໍ່ກະທົບກັນ ບໍ່ກໍ່ໃຫ້ເກີດສຸກຫຼືທຸກ ຫຼື ທັງສຸກ ແລະ ທຸກແກ່ກັນແລະກັນ

ສະພາວະ ໗ ກອງ ອັນໃດແດ່ ຄື

໑. ກອງແຫ່ງທາດດິນ    ໒. ກອງແຫ່ງທາດນ້ຳ
໓. ກອງແຫ່ງທາດໄຟ    ໔. ກອງແຫ່ງທາດລົມ
໕. ກອງສຸກ    ໖. ກອງທຸກ
໗. ກອງຊີວະ

ສະພາວະ ໗ ກອງນີ້ບໍ່ມີຜູ້ສ້າງ ບໍ່ມີຜູ້ບັນດານ ບໍ່ມີຜູ້ເນຣະມິດ ບໍ່ມີຜູ້ໃຫ້ເນຣະມິດ ໝັ້ນຍືນ ໝັ້ນຄົງຄືຍອດພູ ຄືເສົາຣະນຽດ ບໍ່ຫວັ່ນໄຫວ ບໍ່ຜັນແປ ບໍ່ກະທົບກັນ ບໍ່ກໍ່ໃຫ້ເກີດສຸກຫຼືທຸກ ຫຼືທັງສຸກ ແລະ ທຸກແກ່ກັນແລະກັນ ໃນສະພາວະ ໗ ກອງນັ້ນ ບໍ່ມີຜູ້ຂ້າ ບໍ່ມີຜູ້ໃຊ້ໃຫ້ຄົນອື່ນຂ້າ ບໍ່ມີຜູ້ຟັງ ບໍ່ມີຜູ້ໃຊ້ໃຫ້ຄົນອື່ນຟັງ ບໍ່ມີຜູ້ຮູ້ ບໍ່ມີຜູ້ເຮັດ ໃຫ້ຄົນອື່ນຮູ້ ໃຜກໍຕາມແມ່ນຈະເອົາອາວຸດອັນຄົມຕັດຫົວໃຜ ກໍບໍ່ຊື່ວ່າປົງຊີວິດໃຜໄດ້ ຍ້ອນເປັນພຽງອາວຸດແຊກຜ່ານໄປລະຫວ່າງສະພາວະ ໗ ກອງທີ່ນັ້ນເອງ ອັນໜຶ່ງ ກຳເນີດ ທີ່ເປັນປະທານ ໑,໔໐໖,໖໐໐ ກຳ ໕໐໐ ກຳ ໕ ກຳ ໓ ກຳ ເຄິ່ງ໑ ປະຕິປະທາ ໖໒ ອັນຕະຣະກັບ ໖໒ ອະພິຊາດ໒ ໖ ປຸຣິສະພູມ໓ ໘ ອາຊີວົກ ໔,໙໐໐ ປະຣິພາຊົກ ໔,໙໐໐ ນາຄວາດ ໔,໙໐໐ ອິນຊີ ໒,໐໐໐ ນະຣົກ ໓,໐໐໐ ຣໂຊທາດ໒ ໓໖ ສັນຍີ

ທ້ອງ ໗ ອະສັນຍີທ້ອງ ໗ ນີຄັນຖີທ້ອງ໕ ໗ ເທວະດາ ໗ ມະນຸດ ໗ ປີສາດ ໗ ສະ ໗ ຕາໄມ້ໄຜ່ ໗ (ຕາໄມ້ໄຜ່ ໗໐໐) ເຫວໃຫຍ່ ໗ ເຫວນ້ອຍ ໗໐໐ ມະຫາສຸບິນ ໗ ສຸບິນ ໗໐໐ ແລະ ມະຫາກັບຜ ໘,໔໐໐,໐໐໐ ເຫລົ່ານີ້ທີ່ຄົນພາລ ແລະ ບັນດິດພາກັນທ່ຽວວຽນລອຍໄປແລ້ວຈັກເຮັດທີ່ສຸດທຸກໄດ້ເອງ ບໍ່ມີຄວາມສົມຫວັງໃນຄວາມປາຖະໜາວ່າ "ເຮົາຈັກອົບຮົມກຳທີ່ຍັງບໍ່ໃຫ້ຜົນໃຫ້ອຳນວຍຜົນ ຫຼື ສຳຜັດກຳທີ່ໃຫ້ຜົນແລ້ວ ຈັກເຮັດໃຫ້ໝົດສິ້ນໄປດ້ວຍສີນ ພົດ ຕະບະ ຫຼື ພົມມະຈັນນີ້" ບໍ່ມີສຸກທຸກທີ່ເຮັດໃຫ້ສິ້ນສຸດລົງໄດ້ (ຈຳນວນທໍ່ນັ້ນທໍ່ນີ້) ຄືຕວງດ້ວຍທະນານ ສັງສາຣະວັດທີ່ຈະເຮັດໃຫ້ສິ້ນສຸດບໍ່ມີເລີຍ ດ້ວຍອາການແບວນີ້" ບໍ່ມີຄວາມເສື່ອມແລະຄວາມຈະເລີນ ບໍ່ມີການເລື່ອນຂຶ້ນສູງຫຼືເລື່ອນລົງຕ່ຳ ພວກຄົນພານແລະບັນດິດພາກັນທ່ຽວວຽນລອຍໄປແລ້ວ ຈັກເຮັດທີ່ສຸດທຸກໄດ້ເອງ ຄື ກໍ້ດ້າຍທີ່ຖືກດຶກໄປຍ່ອມຄລີ່ໝົດໄປໄດ້ເອງ ສັນນັ້ນ

ໃນລັດທິຂອງສາດສະດານັ້ນ ວິນຍູຊົນຍ່ອມເຫັນປະຈັກດັ່ງນີ້ວ່າ "ທ່ານສາດສະດາຜູ້ມີວາທະແບວນີ້ ມີທິດຖິແບວນີ້ວ່າ "ສະພາວະ ໗ ກອງນີ້ ບໍ່ມີຜູ້ສ້າງ ບໍ່ມີຜູ້ບັນດານ ບໍ່ມີຜູ້ເນຣະມິດ ບໍ່ມີຜູ້ໃຫ້ເນຣະມິດ ໝັ້ນຍືນ ໝັ້ນຄົງ ຄືຍອດພູ ຄືເສົາຣະນຽດ ບໍ່ຫວັ່ນໄຫວ ບໍ່ຜັນແປ ບໍ່ກະທົບກັນ ບໍ່ກໍ່ໃຫ້ເກີດສຸກຫຼືທຸກ ຫຼື ທັງສຸກແລະທຸກແກ່ກັນແລະກັນ

ສະພາວະ ໗ ກອງ ອັນໃດແດ່ ຄື

| | |
|---|---|
| ໑. ກອງແຫ່ງທາດດິນ | ໒. ກອງແຫ່ງທາດນ້ຳ |
| ໓. ກອງແຫ່ງທາດໄຟ | ໔. ກອງແຫ່ງທາດລົມ |
| ໕. ກອງສຸກ | ໖. ກອງທຸກ |
| ໗. ກອງຊີວະ | |

ສະພາວະ ໗ ກອງນີ້ບໍ່ມີຜູ້ສ້າງ ບໍ່ມີຜູ້ບັນດານ ບໍ່ມີຜູ້ເນຣະມິດ ບໍ່ມີຜູ້ໃຫ້ເນຣະມິດ ໝັ້ນຍືນ ໝັ້ນຄົງຄືຍອດພູ ຄືເສົາຣະນຽດ ບໍ່ຫວັ່ນໄຫວ ບໍ່ຜັນແປ ບໍ່ກະທົບກັນ ບໍ່ກໍ່ໃຫ້ເກີດສຸກຫຼືທຸກຫຼືທັງສຸກແລະທຸກແກ່ກັນແລະກັນ ໃນສະພາວະ ໗ ກອງນັ້ນ ບໍ່ມີຜູ້ຂ້າ ບໍ່ມີຜູ້ໃຊ້ໃຫ້ຄົນອື່ນຂ້າ ບໍ່ມີຜູ້ຟັງ ບໍ່ມີຜູ້ໃຊ້ໃຫ້ຄົນອື່ນຟັງ ບໍ່ມີຜູ້ຮູ້ ບໍ່ມີຜູ້ເຮັດໃຫ້ຄົນອື່ນຮູ້ ໃຜກໍຕາມແມ່ນຈະເອົາອາວຸດອັນຄົມຕັດຫົວໃຜ ກໍບໍ່ຊື່ວ່າປົງຊີວິດໃຜໄດ້ ຍ້ອນເປັນພຽງອາວຸດແຊກຜ່ານໄປລະຫວ່າງສະພາວະ ໗ ກອງທໍ່ນັ້ນເອງ ອັນໜຶ່ງ ກຳເນີດທີ່ເປັນປະທານ ໑,໔໐໖,໖໐໐ ກຳ ໕໐໐ ກຳ ໕ ກຳ ໓ ກຳເຄິ່ງ ປະຕິປະທາ ໖໒ ອັນຕະຣະກັບ ໖໒ ອະພິຊາດ ໖ ປຸຣິສະພູມ ໘ ອາຊີວົກ ໔,໙໐໐ ປະຣິພາຊົກ ໔,໙໐໐ ນາຄວາດ ໔,໙໐໐ ອິນຊີ ໒,໐໐໐ ນະຣົກ ໓,໐໐໐ ຣໂຊທາດ ໓໖ ສັນຍີທ້ອງ ໗ ອະສັນຍີທ້ອງ ໗ ນີຄັນຖີທ້ອງ ໗ ເທວະດາ ໗ ມະນຸດ ໗ ປີສາດ ໗ ສະ ໗ ຕາໄມ້ໄຜ່ ໗ (ຕາໄມ້ໄຜ່ ໗໐໐) ເຫວໃຫຍ່ ໗ ເຫວນ້ອຍ ໗໐໐ ມະຫາສຸບິນ ໗ ສຸບິນ ໗໐໐ ມະຫາກັບ ໘,໔໐໐,໐໐໐ ເຫລົ່ານີ້ ທີ່ຄົນພາລແລະບັນດິດພາກັນທ່ຽວວຽນລອຍໄປແລ້ວຈັກເຮັດທີ່ສຸດທຸກໄດ້ເອງ ບໍ່ມີຄວາມ

ສົມຫວັງໃນຄວາມປາຖະໜາວ່າ "ເຮົາຈັກອົບຮົມກຳທີ່ຍັງບໍ່ໃຫ້ຜົນໃຫ້ອຳນວຍຜົນ ຫຼືສຳຜັດກຳທີ່ໃຫ້ຜົນແລ້ວ ຈັກເຮັດໃຫ້ໝົດສິ້ນໄປດ້ວຍສິນ ພົຕ ຕະບະ ຫຼືພົມມະຈັນນີ້" ບໍ່ມີສຸກທຸກທີ່ເຮັດໃຫ້ສິ້ນສຸດລົງໄດ້ (ຈຳນວນທໍ່ນັ້ນທໍ່ນີ້)ຄືຕວງດ້ວຍທະນານ ສັງສາຣະວັດທີ່ຈະເຮັດໃຫ້ສິ້ນສຸດບໍ່ມີເລີຍດ້ວຍອາການແນວນີ້ ບໍ່ມີຄວາມເສື່ອມແລະຄວາມຈະເລີນ ບໍ່ມີການເລື່ອນຂຶ້ນສູງຫຼືເລື່ອນລົງຕ່ຳ ພວກຄົນພານແລະບັນດິດພາກັນທ່ຽວວຽນລອຍໄປແລ້ວ ຈັກເຮັດທີ່ສຸດແຫ່ງທຸກໄດ້ເອງ ຄືກໍ້ດ້າຍທີ່ຖືກດຶກໄປຍ່ອມຄລີ່ໝົດໄປໄດ້ເອງ ສັນນັ້ນ"

ຖ້າຄຳຂອງທ່ານສາດສະດານີ້ເປັນຈິງ ໃນລັດທິນີ້ກຳທີ່ເຮົາບໍ່ໄດ້ເຮັດເລີຍຊື່ວ່າເປັນອັນເຮັດແລ້ວ ພົມມະຈັນທີ່ເຮົາບໍ່ໄດ້ຢູ່ປະພຶດເລີຍ ຊື່ວ່າເປັນອັນຢູ່ປະພຶດແລ້ວ ແມ່ນເຮົາ ທັງສອງຊື່ວ່າເປັນຜູ້ສະເໝີ ໆ ກັນ ແລະເຖິງຄວາມເທົ່າທຽມກັນໃນລັດທິນີ້ ແຕ່ເຮົາບໍ່ກ່າວວ່າ "ຫລັງຈາກຕາຍແລ້ວ ແມ່ນເຮົາທັງສອງກໍຈັກຂາດສູນ ບໍ່ເກີດອີກ" ການທີ່ທ່ານສາດສະດານີ້ເປັນຜູ້ປະພຶດເປືອຍກາຍ ເປັນຄົນຫົວໂລ້ນ ທຳຄວາມພຽນໃນການຍ່າງແຍ່ງແຍ້ ລົກຜົມແລະໜວດ ເປັນການປະຕິບັດເກີນໄປ ເຮົາເມື່ອອະຢູ່ຄອງເຮືອນນອນບຽດສຽດກັບບຸດພັນລະຍາ ປະພົມຜົງແກ່ນຈັນເມືອງກາສີ ທັດຊົງດອກໄມ້ຂອງຫອມ ແລະເຄື່ອງລູບໄລ້ ຍິນດີຄຳແລະເງິນຢູ່ ຈຶ່ງເປັນຜູ້ມີຄະຕິສະເໝີ ໆ ກັນກັບທ່ານສາດສະດານີ້ໃນພົບໜ້າໄດ້ ເຮົານັ້ນຮູ້ອັນໃດເຫັນອັນໃດຢູ່ ຈຶ່ງຈັກປະພຶດພົມມະຈັນໃນສາດສະດານີ້" ວິນຍູຊົນນັ້ນຮູ້ດັ່ງນີ້ວ່າ "ລັດທິນີ້ບໍ່ແມ່ນການປະພຶດພົມມະຈັນ" ຍ່ອມເບື່ອໜ່າຍຫລີກໄປຈາກພົມມະຈັນນັ້ນ

ລັດທິນີ້ບໍ່ແມ່ນການປະພຶດພົມມະຈັນທີ່ວິນຍູຊົນບໍ່ເພິ່ງຢູ່ປະພຶດເລີຍ ເຖິງເມື່ອຢູ່ ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດບໍ່ໄດ້ ເປັນລັດທິທີ່ ໔ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດໄວ້ແລ້ວ

ສັນທະກະ ລັດທິອັນບໍ່ແມ່ນການປະພຶດພົມມະຈັນທີ່ວິນຍູຊົນບໍ່ເພິ່ງຢູ່ປະພຶດເລີຍ ເຖິງເມື່ອຢູ່ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດບໍ່ໄດ້ ໔ ລັດທິນີ້ແລ ທີ່ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດໄວ້ແລ້ວ"

"ທ່ານພຣະອານົນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ໄດ້ຕັດລັດທິອັນບໍ່ແມ່ນການປະພຶດພົມມະຈັນ ໔ ລັດທິ ທີ່ວິນຍູຊົນບໍ່ເພິ່ງຢູ່ປະພຶດເລີຍ ເຖິງເມື່ອຢູ່ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດບໍ່ໄດ້ວ່າ ເປັນລັດທິອັນບໍ່ແມ່ນການປະພຶດພົມມະຈັນ

ທ່ານພຣະອານົນ ພົມມະຈັນທີ່ບໍ່ໜ້າວາງໃຈ ໔ ປະການ ທີ່ວິນຍູຊົນບໍ່ເພິ່ງຢູ່ປະພຶດເລີຍເຖິງເມື່ອຢູ່ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດບໍ່ໄດ້ ທີ່ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດໄວ້ແລ້ວນັ້ນ ເປັນແນວໃດ?"

# ພົມມະຈັນທີ່ບໍ່ໜ້າວາງໃຈ

[໔໔໙] "ສັນທະກະ ສາດສະດາລາງຄົນໃນໂລກນີ້ຕັ້ງຕົນເປັນສັບພັນຍູ ຮູ້ເຫັນທຳ ທັງປວງ ປະຕິຍານຍານທັດສະນະແນວຄົບຖ້ວນວ່າ "ເມື່ອເຮົາຍ່າງຢູ່ ຢຸດຢູ່ ຫລັບຢູ່ ແລະຕື່ນຢູ່ ຍານທັດສະນະຍ່ອມຜາກົດຕໍ່ເນື່ອງຕະຫຼອດໄປ" ສາດສະດານັ້ນເຂົ້າໄປສູ່ເຮືອນ ວ່າງແດ່ ບໍ່ໄດ້ກ້ອນເຂົ້າແດ່ ຖືກໝາກັດແດ່ ພົບຊ້າງຮ້າຍແດ່ ພົບມ້າດຸແດ່ ພົບງົວດຸແດ່ ຖາມເຖິງຊື່ແລະໂຄດຂອງຍິງແດ່ ຂອງຊາຍແດ່ ຖາມເຖິງຊື່ແລະທົນທາງແຫ່ງເຮືອນແດ່ ແຫ່ງນິຄົມແດ່ ເມື່ອຖືກຖາມວ່າ "ນີ້ອັນໃດ" ກໍຕອບວ່າ "ເຮົາເຂົ້າໄປສູ່ເຮືອນວ່າງດ້ວຍກິດທີ່ເຮົາ ຈຳເປັນຕ້ອງເຂົ້າໄປ ເຮົາບໍ່ໄດ້ກ້ອນເຂົ້າດ້ວຍເຫດທີ່ເຮົາບໍ່ຄວນໄດ້ ເຮົາຍັງເປັນຜູ້ຖືກໝາກັດດ້ວຍເຫດທີ່ຄວນຖືກກັດ ເຮົາພົບຊ້າງຮ້າຍດ້ວຍເຫດທີ່ຄວນພົບ ເຮົາພົບມ້າດຸດ້ວຍເຫດທີ່ຄວນພົບ ເຮົາພົບງົວດຸດ້ວຍເຫດທີ່ຄວນພົບ ເຮົາຖາມເຖິງຊື່ແລະໂຄດຂອງຍິງແດ່ ຂອງຊາຍແດ່ ດ້ວຍເຫດທີ່ຄວນຖາມ ເຮົາຖາມເຖິງຊື່ ແລະ ທົນທາງແຫ່ງເຮືອນແດ່ ແຫ່ງນິຄົມແດ່ດ້ວຍເຫດທີ່ຄວນຖາມ"

ໃນພົມມະຈັນຂອງສາດສະດານັ້ນ ວິນຍູຊົນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ "ທ່ານສາດສະດານີ້ ເຊິ່ງຕັ້ງຕົນເປັນສັບພັນຍູ ຮູ້ເຫັນທຳທັງປວງ ປະຕິຍານຍານທັດສະນະແນວຄົບຖ້ວນວ່າ "ເມື່ອເຮົາຍ່າງຢູ່ ຢຸດຢູ່ ຫລັບຢູ່ ແລະຕື່ນຢູ່ ຍານທັດສະນະຍ່ອມຜາກົດຕໍ່ເນື່ອງ ຕະຫຼອດໄປ" ສາດສະດານັ້ນເຂົ້າໄປສູ່ເຮືອນວ່າງແດ່ ບໍ່ໄດ້ກ້ອນເຂົ້າແດ່ ຖືກໝາກັດແດ່ ພົບຊ້າງຮ້າຍແດ່ ພົບມ້າດຸແດ່ ພົບງົວດຸແດ່ ຖາມເຖິງຊື່ແລະໂຄດຂອງຍິງແດ່ ຂອງຊາຍແດ່ ຖາມເຖິງຊື່ແລະທົນທາງແຫ່ງເຮືອນແດ່ ແຫ່ງນິຄົມແດ່ ສາດສະດານັ້ນເມື່ອຖືກຖາມວ່າ "ນີ້ອັນໃດ" ກໍຕອບວ່າ "ເຮົາເຂົ້າໄປສູ່ເຮືອນວ່າງດ້ວຍກິດທີ່ເຮົາຈະຕ້ອງເຂົ້າໄປ ເຮົາບໍ່ໄດ້ກ້ອນເຂົ້າດ້ວຍເຫດທີ່ເຮົາບໍ່ຄວນໄດ້ ເຮົາເປັນຜູ້ຖືກໝາກັດດ້ວຍເຫດທີ່ຄວນຖືກກັດ ເຮົາພົບຊ້າງຮ້າຍດ້ວຍເຫດ ທີ່ຄວນພົບ ເຮົາພົບມ້າດຸດ້ວຍເຫດທີ່ຄວນພົບ ເຮົາພົບງົວດຸດ້ວຍເຫດທີ່ຄວນພົບ ເຮົາຖາມເຖິງ ຊື່ແລະໂຄດຂອງຍິງແດ່ ຂອງຊາຍແດ່ດ້ວຍເຫດທີ່ຄວນຖາມ ເຮົາຖາມເຖິງຊື່ແລະ ທົນທາງແຫ່ງເຮືອນແດ່ ແຫ່ງນິຄົມແດ່ດ້ວຍເຫດທີ່ຄວນຖາມ" ວິນຍູຊົນຮູ້ດັ່ງນີ້ວ່າ "ລັດທິນີ້ເປັນການປະພຶດພົມມະຈັນທີ່ບໍ່ໜ້າວາງໃຈ" ຍ່ອມເບື່ອໜ່າຍຫລີກໄປຈາກພົມມະຈັນນັ້ນ

ສັນທະກະ ພົມມະຈັນທີ່ບໍ່ໜ້າວາງໃຈທີ່ວິນຍູຊົນບໍ່ເພິ່ງຢູ່ປະພຶດເລີຍ ເຖິງເມື່ອຢູ່ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດບໍ່ໄດ້ ເປັນປະການທີ ໑ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດໄວ້ແລ້ວ

[໔໙໐] ສັນທະກະ ອີກປະການໜຶ່ງ ສາດສະດາລາງຄົນໃນໂລກນີ້ ເປັນຜູ້ເຊື່ອຖືການຟັງຕາມກັນມາ ເປັນຜູ້ເຊື່ອຖືວ່າຈິງດ້ວຍການຟັງຕາມກັນມາ ສາດສະດານັ້ນຈຶ່ງສະແດງທຳດ້ວຍການຟັງຕາມກັນມາ ດ້ວຍການຖືສືບ ໆ ກັນມາວ່າແນວນັ້ນ ໆ ແລະດ້ວຍການອ້າງຕຳລາຫຼືຄຳພີ

ສາດສະດາຜູ້ເຊື່ອຖືດ້ວຍການຟັງຕາມກັນມາ ຜູ້ເຊື່ອຖືວ່າຈິງດ້ວຍການຟັງຕາມກັນມາ ຍ່ອມມີການຟັງຖືກແດ່ ຟັງຜິດແດ່ ເປັນແນວນັ້ນແດ່ ເປັນແນວອື່ນແດ່

ໃນພົມມະຈັນຂອງສາດສະດານັ້ນ ວິນຍູຊົນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ "ທ່ານສາດສະດານີ້ ເປັນຜູ້ເຊື່ອຖືການຟັງຕາມກັນມາ ເປັນຜູ້ເຊື່ອຖືວ່າຈິງດ້ວຍການຟັງຕາມກັນມາ ທ່ານສາດສະດານັ້ນ ຈຶ່ງສະແດງທຳດ້ວຍການຟັງຕາມກັນມາ ດ້ວຍການຖືສືບ ໆ ກັນມາວ່າແນວນັ້ນ ໆ ແລະດ້ວຍການອ້າງຕຳລາຫຼືຄຳພີ ເມື່ອສາດສະດາເຊື່ອຖືການຟັງຕາມກັນມາ ເຊື່ອວ່າຈິງ ດ້ວຍການຟັງຕາມກັນມາ ຍ່ອມມີການຟັງຖືກແດ່ ການຟັງຜິດແດ່ ເປັນແນວນັ້ນແດ່ ເປັນແນວອື່ນແດ່" ວິນຍູຊົນນັ້ນ ຮູ້ດັ່ງນີ້ວ່າ "ລັດທິນີ້ເປັນການປະພຶດພົມມະຈັນ ທີ່ບໍ່ໜ້າ ວາງໃຈ" ຍ່ອມເບື່ອໜ່າຍຫລີກໄປຈາກພົມມະຈັນນັ້ນ

ສັນທະກະ ພົມມະຈັນທີ່ບໍ່ໜ້າວາງໃຈທີ່ວິນຍູຊົນບໍ່ເພິ່ງຢູ່ປະພຶດເລີຍ ເຖິງເມື່ອຢູ່ ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດບໍ່ໄດ້ ເປັນປະການທີ ໔ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດໄວ້ແລ້ວ

[໔໓໑] ສັນທະກະ ອີກປະການໜຶ່ງ ສາດສະດາລາງຄົນໃນໂລກນີ້ ເປັນນັກຕັກກະ ເປັນນັກອະພິປັດຊະຍາ ສາດສະດານັ້ນຈຶ່ງສະແດງທຳຕາມປະຕິພານຂອງຕົນ ຕາມຫລັກເຫດຜົນແລະການຄາດຄະເນຄວາມຈິງ ສາດສະດາຜູ້ເປັນນັກຕັກກະ ເປັນນັກອະພິປັດຊະຍາ ກໍຍ່ອມມີການໃຊ້ເຫດຜົນຖືກແດ່ ການໃຊ້ເຫດຜົນຜິດແດ່ ເປັນແນວນັ້ນແດ່ ເປັນແນວອື່ນແດ່

ໃນພົມມະຈັນຂອງສາດສະດານັ້ນ ວິນຍູຊົນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ "ສາດສະດານີ້ເປັນນັກຕັກກະ ເປັນນັກອະພິປັດຊະຍາ ສາດສະດານັ້ນຍ່ອມສະແດງທຳຕາມປະຕິພານຂອງຕົນຕາມຫລັກເຫດຜົນແລະການຄາດຄະເນຄວາມຈິງ ສາດສະດາຜູ້ເປັນນັກຕັກກະ ເປັນນັກອະພິປັດຊະຍາ ກໍຍ່ອມມີການໃຊ້ເຫດຜົນຖືກແດ່ ການໃຊ້ເຫດຜົນຜິດແດ່ ເປັນແນວນັ້ນແດ່ ເປັນແນວອື່ນແດ່" ວິນຍູຊົນນັ້ນຮູ້ດັ່ງນີ້ວ່າ "ລັດທິນີ້ເປັນການປະພຶດພົມມະຈັນ ທີ່ບໍ່ໜ້າ ວາງໃຈ" ຍ່ອມເບື່ອໜ່າຍຫລີກໄປຈາກພົມມະຈັນນັ້ນ

ສັນທະກະ ພົມມະຈັນທີ່ບໍ່ໜ້າວາງໃຈທີ່ວິນຍູຊົນບໍ່ເພິ່ງຢູ່ປະພຶດເລີຍ ເຖິງເມື່ອຢູ່ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດບໍ່ໄດ້ ເປັນປະການທີ ໕ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດໄວ້ແລ້ວ

[໔໓໔] ສັນທະກະ ອີກປະການໜຶ່ງ ສາດສະດາລາງຄົນໃນໂລກນີ້ເປັນຄົນຈ໊າ ງົມງາຍ ຍ້ອນເປັນຄົນຈ໊າ ງົມງາຍ ສາດສະດານັ້ນເມື່ອຖືກຖາມບັນຫາແນວນັ້ນ ໆ ຍ່ອມເວົ້າແບ່ງຮັບແບ່ງສູ້ ຄືຕອບດິ້ນໄດ້ບໍ່ຕາຍໂຕວ່າ "ຄວາມເຫັນຂອງເຮົາວ່າແນວນີ້ກໍບໍ່ແມ່ນ ແນວນັ້ນກໍບໍ່ແມ່ນ

ແນວອື່ນກໍບໍ່ແມ່ນ ບໍ່ແມ່ນກໍບໍ່ແມ່ນ ບໍ່ແມ່ນບໍ່ແມ່ນກໍບໍ່ແມ່ນ"

ໃນພົມມະຈັນຂອງສາດສະດານັ້ນ ວິນຍູຊົນຍ່ອມເຫັນປະຈັກແຈ້ງດັ່ງນີ້ວ່າ "ທ່ານສາດສະດານີ້ເປັນຄົນຈ໊າ ງົມງາຍ" ຍ້ອນເປັນຄົນຈ໊າງົມງາຍ ສາດສະດານັ້ນເມື່ອຖືກຖາມບັນຫາ ແນວນັ້ນ ໆ ຍ່ອມເວົ້າແບ່ງຮັບແບ່ງສູ້ ຄືຕອບດີ້ນໄດ້ບໍ່ຕາຍໂຕວ່າ "ຄວາມເຫັນຂອງເຮົາ ວ່າແນວນີ້ກໍບໍ່ແມ່ນ ແນວນັ້ນກໍບໍ່ແມ່ນ ແນວອື່ນກໍບໍ່ແມ່ນ ບໍ່ແມ່ນກໍບໍ່ແມ່ນ ບໍ່ແມ່ນບໍ່ແມ່ນກໍບໍ່ແມ່ນ" ວິນຍູຊົນນັ້ນຮູ້ດັ່ງນີ້ວ່າ "ລັດທິນີ້ເປັນການປະພຶດພົມມະຈັນທີ່ບໍ່ໜ້າວາງໃຈ" ຍ່ອມເບື່ອໜ່າຍ ຫລີກໄປຈາກພົມມະຈັນນັ້ນ

ພົມມະຈັນທີ່ບໍ່ໜ້າວາງໃຈທີ່ວິນຍູຊົນບໍ່ເພິ່ງຢູ່ປະພຶດເລີຍ ເຖິງເມື່ອຢູ່ກໍທຳກຸສົນທຳ ທີ່ຖືກຕ້ອງໃຫ້ສຳເລັດບໍ່ໄດ້ ເປັນປະການທີ ໔ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດໄວ້ແລ້ວ

ສັນທະກະ ພົມມະຈັນທີ່ບໍ່ໜ້າວາງໃຈທີ່ວິນຍູຊົນບໍ່ເພິ່ງຢູ່ປະພຶດເລີຍ ເຖິງເມື່ອຢູ່ ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດບໍ່ໄດ້ ໔ ປະການນີ້ແລ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດໄວ້ແລ້ວ"

ສັນທະກະປະຣິພາຊົກຖາມວ່າ "ທ່ານພຣະອານົນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າຕັດພົມມະຈັນທີ່ບໍ່ໜ້າວາງໃຈ ໔ ປະການ ທີ່ວິນຍູຊົນບໍ່ເພິ່ງຢູ່ປະພຶດເລີຍ ເຖິງເມື່ອຢູ່ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດບໍ່ໄດ້ວ່າ "ເປັນພົມມະຈັນທີ່ບໍ່ໜ້າວາງໃຈ"

ທ່ານພຣະອານົນ ສາດສະດານັ້ນມັກກ່າວກັນແນວໃດ ບອກກັນແນວໃດ ໃນພົມມະຈັນທີ່ວິນຍູຊົນເພິ່ງຢູ່ປະພຶດຈິງຈັງ ແລະ ເມື່ອຢູ່ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດໄດ້"

## ພົມມະຈັນທີ່ຄວນປະພຶດ

[໔໖໖] ທ່ານພຣະອານົນຕອບວ່າ "ສັນທະກະ ພຣະຕະຖາຄົດສະເດັດອຸບັດຂຶ້ນມາ ໃນໂລກນີ້ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະໃນສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫລາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ຯລຯ ພິກຂຸນັ້ນລະນິວອນ ໕ ປະການນີ້ ທີ່ເປັນເຄື່ອງເສົ້າໝອງໃຈ ເປັນເຄື່ອງທອນກຳລັງປັນຍາແລ້ວ ສະຫງັດຈາກກາມແລະອະກຸສົນທຳທັງຫລາຍແລ້ວ ບັນລຸປະຖົມຊານ ທີ່ມີວິຕົກວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ ສາວົກຍ່ອມບັນລຸຄຸນວິເສດອັນຍິ່ງເຫັນຢູ່ແນວນັ້ນໃນ

ສາດສະດາໃດ ວິນຍູຊົນເພິ່ງຢູ່ປະພຶດພົມມະຈັນໃນສາດສະດານັ້ນຢ່າງຈິງຈັງ ແລະເມື່ອຢູ່ ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດໄດ້

ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານ ຯລຯ ຢູ່ ສາວົກຍ່ອມບັນລຸຄຸນວິເສດຢ່າງຍິ່ງເຫັນຢູ່ແນວນັ້ນໃນສາດສະດາໃດ ວິນຍູຊົນເພິ່ງຢູ່ປະພຶດພົມມະຈັນໃນສາດສະດານັ້ນຢ່າງຈິງຈັງ ແລະເມື່ອຢູ່ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດໄດ້

ອີກປະການໜຶ່ງ ຍ້ອນປີຕິຈາງຄາຍອອກ ພິກຂຸຜູ້ມີອຸເປກຂາ ບັນລຸຕະຕິຍະຊານ ຯລຯ ຢູ່ ສາວົກຍ່ອມບັນລຸຄຸນວິເສດຢ່າງຍິ່ງເຫັນຢູ່ແນວນັ້ນໃນສາດສະດາໃດ ວິນຍູຊົນເພິ່ງຢູ່ປະພຶດພົມມະຈັນໃນສາດສະດານັ້ນຢ່າງຈິງຈັງ ແລະ ເມື່ອຢູ່ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດໄດ້

ອີກປະການໜຶ່ງ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນ ພິກຂຸບັນລຸຈະຕຸດຖະຊານ ຯລຯ ຢູ່ ສາວົກຍ່ອມບັນລຸຄຸນວິເສດຢ່າງຍິ່ງເຫັນຢູ່ແນວນັ້ນໃນ ສາດສະດາໃດ ວິນຍູຊົນເພິ່ງຢູ່ປະພຶດພົມມະຈັນໃນສາດສະດານັ້ນຢ່າງຈິງຈັງ ແລະ ເມື່ອຢູ່ ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດໄດ້

ເມື່ອຈິດເປັນສະມາທິ ບໍລິສຸດ ຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ໑ ປາສະຈາກຄວາມ ເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດໄປ ເພື່ອປຸບເພນິວາສານຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໔ ຊາດ ແດ່ ຯລຯ ໑ ທ່ານຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້ ສາວົກຍ່ອມບັນລຸຄຸນວິເສດອັນຍິ່ງເຫັນຢູ່ແນວນັ້ນໃນສາດສະດາໃດ ວິນຍູຊົນເພິ່ງຢູ່ປະພຶດພົມມະຈັນໃນສາດສະດານັ້ນຢ່າງຈິງຈັງ ແລະເມື່ອຢູ່ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ ສຳເລັດໄດ້

ເມື່ອຈິດເປັນສະມາທິ ບໍລິສຸດ ຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມ ເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມ ຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດທີ່ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມ ແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດ ຜູ້ເປັນໄປຕາມກຳດ້ວຍປະການແນວນີ້ ສາວົກຍ່ອມບັນລຸຄຸນວິເສດອັນຍິ່ງເຫັນຢູ່ແນວນັ້ນໃນສາດສະດາໃດ ວິນຍູຊົນເພິ່ງຢູ່ປະພຶດພົມມະຈັນໃນສາດສະດານັ້ນຢ່າງຈິງຈັງ ແລະເມື່ອຢູ່ ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດໄດ້

ເມື່ອຈິດເປັນສະມາທິ ບໍລິສຸດ ຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມ ເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມ ຈິດໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ ທຸກຂະນິໂຣດ ນີ້

ທຸກຂະນິໂຣດຄາມິນີປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸໄທ ນີ້ອາສະວະນິໂຣດ ນີ້ ອາສະວະນິໂຣດຄາມິນີປະຕິປະທາ" ເມື່ອທ່ານຮູ້ເຫັນຢູ່ແນວນີ້ ຈິດຍ່ອມລຸດພົ້ນຈາກກາມາສະຫວະ ພະວາດະວະ ແລະອະວິດຊາສະຫວະ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ສັນທະກະ ສາວົກຍ່ອມບັນລຸຄຸນວິເສດອັນຍິ່ງເຫັນຢູ່ຢ່າງນີ້ໃນສາດສະດາໃດ ວິນຍູຊົນເພິ່ງຢູ່ປະພຶດພົມມະຈັນໃນສາດສະດານັ້ນຢ່າງຈິງຈັງ ແລະເມື່ອຢູ່ກໍທຳກຸສົນທຳທີ່ຖືກຕ້ອງໃຫ້ສຳເລັດໄດ້"

## ພຣະອະຣະຫັນຕະຂີນາສົບບໍ່ລະເມີດຖານະ ໕

[໔໓໔] ສັນທະກປະຣິພາຊົກຖາມວ່າ "ທ່ານພຣະອານົນ ພິກຂຸໃດເປັນພຣະອະຣະຫັນຕະ-ຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງ ພິກຂຸນັ້ນຈະຍັງບໍຣິໂພກກາມຢູ່ອີກບໍ"

ທ່ານພຣະອານົນຕອບວ່າ "ສັນທະກະ ພິກຂຸໃດເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງ ພິກຂຸນັ້ນເປັນຜູ້ບໍ່ສາມາດລະເມີດຖານະ ໕ ປະການ ຄື

໑. ເປັນຜູ້ບໍ່ສາມາດແກ້ຂ້າສັດຈາກຊີວິດ
໒. ເປັນຜູ້ບໍ່ສາມາດຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ອັນເປັນສ່ວນແຫ່ງການລັກ
໓. ເປັນຜູ້ບໍ່ສາມາດເສບເມຖຸນທຳ
໔. ເປັນຜູ້ບໍ່ສາມາດກ່າວຕົວະທັງທີ່ຮູ້ຢູ່
໕. ເປັນຜູ້ບໍ່ສັ່ງສົມບໍຣິໂພກກາມທັງຫລາຍຄືເມື່ອເປັນຄະຫຼືຫັດໃນການກ່ອນ

ສັນທະກະ ພິກຂຸໃດເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງ ພິກຂຸນັ້ນຍ່ອມເປັນຜູ້ບໍ່ສາມາດລະເມີດຖານະ ໕ ປະການນີ້"

## ຍານທັດສະນະຂອງພຣະອະຣະຫັນຕະຂີນາສົບ

[໔໓໕] "ທ່ານພຣະອານົນ ພິກຂຸໃດເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມ-ຈຣຣຍ໌ ແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງ ພິກຂຸນັ້ນຍ່າງໄປຢູ່ ຢຸດຢູ່ ຫລັບຢູ່ ແລະຕື່ນຢູ່ ຍານທັດສະນະວ່າ "ອາສະວະທັງຫລາຍຂອງເຮົາສິ້ນໄປແລ້ວ" ຈະຜາກົດຕໍ່ເນື່ອງຕະຫຼອດໄປບໍ່"

"ສັນທະກະ ຖ້າເຊັ່ນນັ້ນ ເຮົາຈັກອຸປະມາໃຫ້ທ່ານຟັງ ວິນຍູຊົນລາງພວກໃນໂລກນີ້ຍ່ອມຮູ້ທົ່ວເຖິງເນື້ອຄວາມແຫ່ງພາສິດໄດ້ດ້ວຍອຸປະມາ ປຽບຄືຄົນທີ່ມີມືແລະຕີນຂາດໄປ ເມື່ອຄົນນັ້ນຍ່າງໄປຢູ່ ຢຸດຢູ່ ຫລັບຢູ່ ແລະຕື່ນຢູ່ ກໍຮູ້ສະເໝີຕໍ່ເນື່ອງວ່າ "ມືແລະຕີນຂອງເຮົາ ຂາດແລ້ວ" ຫຼືເມື່ອເຂົາພິຈາລະນາເຫດນັ້ນຢູ່ກໍຮູ້ວ່າ "ມືແລະຕີນຂອງເຮົາຂາດແລ້ວ" ບໍ"

"ທ່ານພຣະອານົນ ຄົນນັ້ນຍ່ອມບໍ່ຮູ້ສະເໝີຕໍ່ເນື່ອງວ່າ "ມືແລະຕີນຂອງເຮົາ ຂາດແລ້ວ" ແຕ່ເຂົາພິຈາລະນາເຫດນັ້ນແລ້ວຈຶ່ງຮູ້ວ່າ "ມືແລະຕີນຂອງເຮົາຂາດແລ້ວ"

"ສັນທະກະ ພິກຂຸນັ້ນກໍແນວນັ້ນຄືກັນ ເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງ ເມື່ອທ່ານຍ່າງໄປຢູ່ ຢຸດຢູ່ ຫລັບຢູ່ ແລະຕື່ນຢູ່ ຍານທັດສະນະວ່າ "ອາສະວະທັງຫລາຍຂອງເຮົາສິ້ນໄປແລ້ວ" ກໍບໍ່ປາກົດຕໍ່ເນື່ອງຕະຫຼອດໄປ ແຕ່ເມື່ອພິກຂຸນັ້ນພິຈາລະນາເຫດນັ້ນຢູ່ຈຶ່ງຮູ້ວ່າ "ອາສະວະທັງຫລາຍຂອງເຮົາສິ້ນໄປແລ້ວ"

[໔໓໖] ສັນທະກປະຣິພາຊົກຖາມວ່າ "ທ່ານພຣະອານົນ ໃນພຣະທຳວິໄນນີ້ ພິກຂຸກຳຈັດກິເລດ ແລະ ກອງທຸກໃຫ້ອອກໄປໄດ້ມີຈຳນວນຫຼາຍພຽງໃດ?"

ທ່ານພຣະອານົນຕອບວ່າ "ສັນທະກະ ໃນພຣະທຳວິໄນນີ້ ພິກຂຸຜູ້ກຳຈັດກິເລດແລະກອງທຸກໃຫ້ອອກໄປໄດ້ ບໍ່ແມ່ນມີພຽງ ໑໐໐ ຮູບ ໒໐໐ ຮູບ ໓໐໐ ຮູບ ໔໐໐ ຮູບ ໕໐໐ ອົງ ຄວາມຈິງແລ້ວມີຢູ່ຈຳນວນຫຼາຍຢ່າງແນ່ນອນ"

ສັນທະກປະຣິພາຊົກກ່າວວ່າ "ທ່ານພຣະອານົນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດໃນພຣະທຳວິໄນນີ້ບໍ່ໄດ້ມີການຍົກຍ້ອງທຳຂອງຕົນ ແລະບໍ່ມີການຕິຕຽນທຳຂອງຜູ້ອື່ນ ມີແຕ່ການສະແດງທຳຕາມເຫດຜົນທີ່ນັ້ນ ແຕ່ກໍປາກົດວ່າມີຜູ້ກຳຈັດກິເລດ ແລະກອງທຸກໄດ້ຫລວງຫລາຍເຖິງພຽງນັ້ນ ສ່ວນອາຊີວົກເຫລົ່ານີ້ຊື່ວ່າເປັນບຸດຂອງມານດາຜູ້ມີບຸດ ຕາຍແລ້ວ ຍ້ອງຍໍແຕ່ຕົນແລະຕິຕຽນ

ຄົນອື່ນທີ່ນັ້ນ ກັບປາກົດວ່າມີຜູ້ກຳຈັດກິເລດແລະກອງທຸກໄດ້ພຽງ ໓ ຄົນ ຄື (໑) ນັນທະ ວັດສະ (໔) ກິສະ ສັງກິດຈະ (໓) ມັກຂະລິ ໂຄສານ”

ລຳດັບນັ້ນ ສັນທະກະປະຣິພາຊົກຮຽກບໍລິສັດຂອງຕົນມາກ່າວວ່າ “ພໍ່ຜູ້ຈະເລີນທັງຫລາຍ ຈົ່ງປະພຶດພົມມະຈັນກັນເທີ້ນ ການຢູ່ປະພຶດພົມມະຈັນໃນພຣະສະມະນະໂຄດົມຍ່ອມມີຜົນ ແຕ່ບັດນີ້ ເຮົາທັງຫລາຍ ຈະສະລະລາບສັກກາຣະ ແລະ ຄວາມສັນເສີນນັ້ນບໍ່ແມ່ນເປັນຂອງເຮັດໄດ້ງ່າຍ”

ສັນທະກະປະຣິພາຊົກ ໄດ້ສົ່ງບໍລິສັດຂອງຕົນໄປປະພຶດພົມມະຈັນໃນສຳນັກພຣະຜູ້ມີພຣະພາກເຈົ້າ ດ້ວຍອາການຢ່າງນີ້ ດັ່ງນີ້ແລ

**ສັນທະກະສູດທີ່ ໖ ຈົບ**

# ໗. ມະຫາສະກຸລຸທາຍິສູດ

## ວ່າດ້ວຍປະຣິພາຊົກຊື່ສະກຸລຸທາຍິ ສູດໃຫຍ່

[໔໓໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ສະໄໝນັ້ນແລ ປະຣິພາຊົກຜູ້ມີຊື່ສຽງຈຳນວນຫຼາຍ ຄື ປະຣິພາຊົກຊື່ອັນນພາລະ ປະຣິພາຊົກຊື່ວັນຕະຣະ ປະຣິພາຊົກຊື່ສະກຸລຸທາຍິ ແລະ ປະຣິພາຊົກເຫຼົ່າອື່ນລ້ວນມີ ຊື່ສຽງ ອາໄສຢູ່ໃນອາຣາມຂອງປະຣິພາຊົກອັນເປັນທີ່ໃຫ້ເຫຍື່ອແກ່ນົກຍູງ ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນສະເດັດເຂົ້າໄປບິນທະບາດໃນກຣຸງຣາດຊະຄຶ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ມີພຣະດຳຣິ ວ່າ

“ຍັງເຊົ້າເກີນໄປທີ່ຈະທ່ຽວບິນທະບາດໃນເຂດນະຄອນຣາດຊະຄຶ ທາງທີ່ດີ ເຮົາຄວນເຂົ້າໄປຫາສະກຸລຸທາຍິປະຣິພາຊົກ ຈົນເຖິງອາຣາມຂອງປະຣິພາຊົກອັນເປັນທີ່ໃຫ້ເຫຍື່ອແກ່ນົກຍູງ”

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ສະເດັດເຂົ້າໄປສູ່ອາຣາມຂອງປະຣິພາຊົກອັນເປັນທີ່ໃຫ້ເຫຍື່ອ ແກ່ນົກຍູງ

## ເດຍຣັດສານກະຖາ

ສະໄໝນັ້ນ ສະກຸລຸທາຍີປະຣິພາຊົກກຳລັງນັ່ງຢູ່ກັບປະຣິພາຊົກບໍລິສັດໝູ່ໃຫຍ່ຜູ້ກຳລັງສົນທະນາເຖິງເດຍຣັດສານກະຖາຕ່າງ ໆ ດ້ວຍສຽງດັງອື້ອຶງ ຄື ເວົ້າເລື້ອງພຣະຣາຊາ ເລື້ອງໂຈນ ເລື້ອງມະຫາອຳມາດ ເລື້ອງກອງທັບ ເລື້ອງໄພ ເລື້ອງການຣົບ ເລື້ອງເຂົ້າ ເລື້ອງນ້ຳ ເລື້ອງຜ້າ ເລື້ອງທີ່ນອນ ເລື້ອງພວງດອກໄມ້ ເລື້ອງຂອງຫອມ ເລື້ອງຍາດ ເລື້ອງຍານ ເລື້ອງເຮືອນ ເລື້ອງ ນິຄົມ ເລື້ອງເມືອງຫລວງ ເລື້ອງຊົນນະບົດ ເລື້ອງສະຕີ (ເລື້ອງບຸຣຸດ) ເລື້ອງຄົນກ້າຫານ ເລື້ອງ ຮ່ອມ ເລື້ອງທ່ານ້ຳ ເລື້ອງຄົນທີ່ລ່ວງລັບໄປແລ້ວ ເລື້ອງຕ່າງ ໆ ເລື້ອງໂລກ ເລື້ອງທະເລ ເລື້ອງຄວາມຈະເລີນແລະຄວາມເສື່ອມແນວນັ້ນ ໆ ສະກຸລຸທາຍີປະຣິພາຊົກໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ກຳລັງສະເດັດມາແຕ່ໄກ ຈຶ່ງຫ້າມບໍລິສັດຂອງຕົນວ່າ

"ທ່ານຜູ້ຈະເລີນທັງຫລາຍ ໂຜດງຽບນອຍ ຢ່າສົ່ງສຽງອື້ອຶງ ພຣະສະມະນະໂຄດົມ ກຳລັງສະເດັດມາ ພຣະອົງໂຜດສຽງເບົາ ຊົງແນະນຳໃຫ້ເວົ້າກັນເບົາ ໆ ຕັດສັນເສີນຄຸນຂອງຄົນທີ່ເວົ້າສຽງເບົາ ບາງເທື່ອພຣະອົງຊົງຮູ້ວ່າ ບໍລິສັດສຽງເບົາ ພຣະອົງອາດຈະ ສະເດັດເຂົ້າມາຫາກໍໄດ້"

ລຳດັບນັ້ນ ປະຣິພາຊົກເຫຼົ່ານັ້ນຈຶ່ງໄດ້ພາກັນນິ່ງ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ສະເດັດເຂົ້າໄປຫາສະກຸລຸທາຍີປະຣິພາຊົກຮອດບ່ອນຢູ່ ສະກຸລຸທາຍີປະຣິພາຊົກທູນເຊື້ອເຊີນພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ພຣະອົງຜູ້ຈະເລີນ ຂໍເຊີນພຣະຜູ້ມີພຣະພາກເຈົ້າຈົ່ງສະເດັດເຂົ້າມາເທີ້ນ ຂໍຕ້ອນຮັບສະເດັດ ດົນ ໆ ພຣະອົງຈະມີເວລາສະເດັດມາທີ່ນີ້ ຂໍເຊີນພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທີ້ນ ອາສະນະນີ້ປູລາດໄວ້ແລ້ວ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຈຶ່ງປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ແມ່ນສະກຸລຸທາຍີປະຣິພາຊົກ ກໍເລືອກນັ່ງຢູ່ບ່ອນທີ່ສົມຄວນທີ່ໃດທີ່ໜຶ່ງເຊິ່ງຕ່ຳກວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມສະກຸລຸທາຍີປະຣິພາຊົກວ່າ

## ເລື້ອງການທຳຄວາມເຄົາລົບ

[໔໖໗] "ອຸທາຍີ ບັດນີ້ ທ່ານທັງຫລາຍນັ່ງປະຊຸມສົນທະນາກັນດ້ວຍເລື້ອງອັນໃດ ເລື້ອງອັນໃດທີ່ທ່ານທັງຫລາຍສົນທະນາກັນຄ້າງໄວ້"

ສະກຸລຸທາຍີປະຣິພາຊົກທູນຕອບວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ເລື້ອງທີ່ຂ້າພຣະອົງທັງຫລາຍນັ່ງປະຊຸມສົນທະນາກັນໃນເວລານີ້ ຂອງດໄວ້ກ່ອນເທີ້ນ ເລື້ອງນີ້ພຣະຜູ້ມີພຣະພາກ

ເຈົ້າ ຈະຊົງສະດັບໄດ້ໃນພາຍຫລັງໂດຍບໍ່ຍາກ ຂ້າແດ່ພຣະອົງຜູ້ຈະເລີນ ມື້ກ່ອນ ໆ ພວກສະມະນະພາມຜູ້ມີລັດທິຕ່າງກັນໄດ້ມາຊຸມນຸມກັນທີ່ສາລາຖົກແຖລງ ໄດ້ສົນທະນາກັນເຖິງເລື້ອງນີ້ວ່າ "ທ່ານຜູ້ຈະເລີນທັງຫລາຍ ເປັນລາບຂອງຊາວອັງຄະແລະຊາວມະຄົດບໍ ຊາວອັງຄະແລະຊາວມະຄົດໄດ້ດີແລ້ວບໍ ທີ່ສະມະນະພາມຜູ້ເປັນເຈົ້າໝູ່ເຈົ້າຄະນະ ເປັນຄະນາຈານ ເປັນຜູ້ມີຊື່ສຽງ ມີກຽດຕິຍົດ ເປັນເຈົ້າລັດທິ ຄົນຈຳນວນຫຼາຍຍ້ອງຍໍກັນວ່າເປັນຄົນດີ ເຂົ້າຈຳພັນສາໃນນະຄອນຣາດຊະຄືແລ້ວ ຄື ປູຣະນະ ກັດສະປະ ຜູ້ເປັນເຈົ້າໝູ່ເຈົ້າຄະນະ ເປັນຄະນາຈານ ເປັນຜູ້ມີຊື່ສຽງ ມີກຽດຕິຍົດ ເປັນເຈົ້າລັດທິ ຄົນຈຳນວນຫຼາຍຍ້ອງຍໍກັນວ່າເປັນຄົນດີ ເຂົ້າຈຳພັນສາໃນນະຄອນຣາດຊະຄືແລ້ວ ມັກຂະລິ ໂຄສານ ຯລຯ ອະຊິຕະ ເກສະກຳພົນ ຯລຯ ປະກຸທະກັດຈາຍະນະ ຯລຯ ສັນຊັຍ ເວລັດຖະບຸຕ ຯລຯ ນິຄົນນາຕະບຸດ ຜູ້ເປັນເຈົ້າໝູ່ເຈົ້າຄະນະເປັນຄະນາຈານ ເປັນຜູ້ມີຊື່ສຽງ ມີກຽດຕິຍົດ ເປັນເຈົ້າລັດທິ ຄົນຈຳນວນຫຼາຍຍ້ອງຍໍກັນວ່າເປັນຄົນດີ ລວມທັງພຣະສະມະນະໂຄດົມແມ່ນນີ້ ຜູ້ເປັນເຈົ້າໝູ່ ເຈົ້າຄະນະ ເປັນຄະນາຈານ ເປັນຜູ້ມີຊື່ສຽງ ມີກຽດ ຕິຍົດ ເປັນເຈົ້າລັດທິ ຄົນຈຳນວນຫຼາຍຍ້ອງຍໍກັນວ່າເປັນຄົນດີ ພຣະອົງກໍສະເດັດເຂົ້າຈຳພັນສາ ໃນນະຄອນຣາດຊະຄືຄືກັນ ບັນດາທ່ານສະມະນະພາມຜູ້ເປັນເຈົ້າໝູ່ເຈົ້າຄະນະເປັນຄະນາຈານ ເປັນຜູ້ມີຊື່ສຽງ ມີກຽດຕິຍົດ ເປັນເຈົ້າລັດທິ ຄົນຈຳນວນຫຼາຍຍ້ອງຍໍກັນວ່າເປັນຄົນດີ ນີ້ ໃຜບໍທີ່ສາວົກທັງຫລາຍສັກກາຣະ ເຄົາລົບ ນັບຖື ບູຊາ ແລະ ສາວົກທັງຫລາຍສັກກາຣະ ເຄົາລົບແລ້ວອາໄສໃຜບໍຢູ່"

## ເລື້ອງສິດບໍ່ເຄົາລົບຄູທັງ ໖

[໔໖໗] ໃນບ່ອນປະຊຸມນັ້ນ ສະມະນະພາມລາງພວກກ່າວແນວນີ້ວ່າ "ຄູປູຣະນະ ກັດສະປະນີ້ເຖິງຈະເປັນເຈົ້າໝູ່ເຈົ້າຄະນະ ເປັນຄະນາຈານ ເປັນຜູ້ມີຊື່ສຽງ ມີກຽດຕິຍົດ ເປັນເຈົ້າລັດທິຄົນຈຳນວນຫຼາຍຍ້ອງຍໍກັນວ່າເປັນຄົນດີ ແຕ່ສາວົກທັງຫລາຍກໍບໍ່ຍອມ ສັກກາຣະ ເຄົາລົບ ນັບຖື ບູຊາ ແລະ ສາວົກທັງຫລາຍສັກກາຣະ ເຄົາລົບແລ້ວ ກໍບໍ່ອາໄສ ຄູປູຣະນະ ກັດສະປະຢູ່

ເລື້ອງເຄີຍມີມາແລ້ວ ຄູປູຣະນະ ກັດສະປະສະແດງທຳແກ່ບໍລິສັດຫຼາຍຮ້ອຍ ໃນບໍລິສັດນັ້ນ ສາວົກຄົນໜຶ່ງຂອງຄູປູຣະນະ ກັດສະປະໄດ້ສົ່ງສຽງຂຶ້ນວ່າ "ທ່ານຜູ້ຈະເລີນທັງຫລາຍ ຢ່າຖາມເນື້ອຄວາມນີ້ກັບຄູປູຣະນະ ກັດສະປະເລີຍ ຄູປູຣະນະ ກັດສະປະນີ້ບໍ່ຮູ້ເນື້ອຄວາມນີ້ ພວກເຮົາຊິ ຈຶ່ງຈະຮູ້ເນື້ອຄວາມນີ້ ພວກທ່ານຈົ່ງຖາມເນື້ອຄວາມນີ້ກັບພວກເຮົາເທີ້ນ ພວກເຮົາຈັກອະທິບາຍໃຫ້ທ່ານຟັງ" ເລື້ອງເຄີຍມີມາແລ້ວ ຄູປູຣະນະ ກັດສະປະຍົກມືທັງສອງຂຶ້ນ ແລ້ວກ່າວຂໍຮ້ອງວ່າ "ທ່ານຜູ້ຈະເລີນທັງຫລາຍ ຈົ່ງງຽບສຽງນອຍ ຢ່າສົ່ງສຽງໄປເລີຍ ທ່ານພວກນີ້ຈະຖາມພວກທ່ານບໍ່ໄດ້ ແຕ່ຖາມເຮົາໄດ້ ເຮົາຈັກອະທິບາຍໃຫ້ທ່ານພວກນີ້ຟັງ" ກໍຫ້າມບໍ່ໄດ້

ອັນໜຶ່ງ ສາວົກຂອງຄູປູຣະນະ ກັດສະປະເປັນຈຳນວນຫລາຍ ພາກັນຍົກໂທດວ່າ "ທ່ານ

ບໍ່ຮູ້ທົ່ວເຖິງທຳວິໄນນີ້ ແຕ່ເຮົາຮູ້ທົ່ວເຖິງ ທ່ານຈະຮູ້ທົ່ວເຖິງທຳວິໄນນີ້ໄດ້ແນວໃດ ທ່ານປະຕິບັດຜິດ ແຕ່ເຮົາປະຕິບັດຖືກ ຄຳເວົ້າຂອງເຮົາມີປະໂຫຍດ ແຕ່ຄຳເວົ້າຂອງທ່ານບໍ່ມີປະໂຫຍດ ຄຳທີ່ຄວນເວົ້າກ່ອນທ່ານກັບເວົ້າພາຍຫລັງ ຄຳທີ່ຄວນເວົ້າພາຍຫລັງ ທ່ານກັບເວົ້າກ່ອນ ເລື້ອງທີ່ທ່ານເຄີຍຊິນໄດ້ຜັນແປໄປແລ້ວ ເຮົາຈັບຜິດຄຳເວົ້າຂອງທ່ານໄດ້ແລ້ວ ເຮົາຂົ່ມທ່ານໄດ້ແລ້ວ ຖ້າທ່ານມີຄວາມສາມາດກໍຈົ່ງຫາທາງແກ້ໄຂຄຳເວົ້າ ຫຼື ປົດຕົນໃຫ້ພົ້ນຜິດເທີ້ນ" ແລ້ວພາກັນຫລີກໄປ ພວກສາວົກບໍ່ຍອມສັກກາຣະ ເຄົາລົບ ນັບຖື ບູຊາຄູປູຣະນະ ກັດສະປະດ້ວຍອາການແນວນີ້ ແລະສາວົກທັງຫລາຍ ບໍ່ສັກກາຣະ ເຄົາລົບແລ້ວ ກໍບໍ່ອາໄສຄູປູຣະນະ ກັດສະປະຢູ່ ຄູປູຣະນະກັດສະປະກໍບໍ່ໂກດ ຍ້ອນເປັນການຕຳໜິທີ່ຊອບທຳ"

ສະມະນະພາມລາງພວກກ່າວແນວນີ້ວ່າ "ແມ່ນຄູມັກຂະລີ ໂຄສານນີ້ຯລຯຄູອະຊິຕະ ເກສະກຳພົນຯລຯ ຄູປະກຸທະ ກັດຈາຍະນະຯລຯ ຄູສັນຊັຍ ເວລັດຖະບຸຕຯລຯ ຄູນິຄົນ ນາຕະບຸດເຖິງຈະເປັນເຈົ້າໝູ່ເຈົ້າຄະນະ ເປັນຄະນາຈານ ເປັນຄົນມີຊື່ສຽງ ມີກຽດຕິຍົດ ເປັນເຈົ້າ ລັດທິຄົນຈຳນວນຫຼາຍຍ້ອງຍໍກັນວ່າເປັນຄວາມດີ ແຕ່ສາວົກທັງຫລາຍບໍ່ຍອມສັກກາຣະ ເຄົາລົບ ນັບຖື ບູຊາ ແລະສາວົກທັງຫລາຍສັກກາຣະ ເຄົາລົບແລ້ວ ກໍບໍ່ອາໄສຄູນິຄົນ ນາຕະບຸດຢູ່

ເລື້ອງເຄີຍມີມາແລ້ວ ຄູນິຄົນ ນາຕະບຸດສະແດງທຳແກ່ບໍລິສັດຫຼາຍຮ້ອຍ ໃນບໍລິສັດນັ້ນສາວົກຄົນໜຶ່ງຂອງຄູນິຄົນ ນາຕະບຸດໄດ້ສົ່ງສຽງຂຶ້ນວ່າ "ທ່ານຜູ້ຈະເລີນທັງຫລາຍ ຢ່າຖາມ ເນື້ອຄວາມນີ້ກັບຄູນິຄົນ ນາຕະບຸດເລີຍ ຄູນິຄົນ ນາຕະບຸດນີ້ບໍ່ຮູ້ເນື້ອຄວາມນີ້ ພວກເຮົາຊິຈຶ່ງຈະຮູ້ເນື້ອຄວາມນີ້ ພວກທ່ານຈົ່ງຖາມເນື້ອຄວາມນີ້ກັບເຮົາເທີ້ນ ເຮົາຈະອະທິບາຍເນື້ອຄວາມນີ້ໃຫ້ທ່ານຟັງ" ເລື້ອງເຄີຍມີມາແລ້ວ ຄູນິຄົນ ນາຕະບຸດຍົກມືທັງສອງຂຶ້ນ ແລ້ວກ່າວຂໍຮ້ອງວ່າ "ທ່ານຜູ້ຈະເລີນທັງຫລາຍ ຈົ່ງງຽບສຽງນອຍ ຢ່າສົ່ງສຽງໄປເລີຍ ທ່ານພວກນີ້ຈະຖາມພວກທ່ານບໍ່ໄດ້ ແຕ່ຖາມເຮົາໄດ້ ເຮົາຈັກອະທິບາຍໃຫ້ທ່ານພວກນີ້ຟັງ" ກໍຫ້າມບໍ່ໄດ້

ອັນໜຶ່ງ ສາວົກຂອງຄູນິຄົນ ນາຕະບຸດເປັນຈຳນວນຫລາຍ ພາກັນຍົກໂທສວ່າ "ທ່ານບໍ່ຮູ້ ທົ່ວເຖິງທຳວິໄນນີ້ ແຕ່ຜົມຮູ້ທົ່ວເຖິງ ທ່ານຈະຮູ້ທົ່ວເຖິງທຳວິໄນນີ້ໄດ້ແນວໃດ ທ່ານປະຕິບັດຜິດ ແຕ່ເຮົາປະຕິບັດຖືກ ຄຳເວົ້າຂອງເຮົາມີປະໂຫຍດ ແຕ່ຄຳເວົ້າຂອງທ່ານບໍ່ມີປະໂຫຍດ ຄຳທີ່ຄວນເວົ້າກ່ອນທ່ານກັບເວົ້າພາຍຫລັງ ຄຳທີ່ຄວນເວົ້າພາຍຫລັງ ທ່ານກັບເວົ້າກ່ອນ ເລື້ອງທີ່ທ່ານເຄີຍຊິນໄດ້ຜັນແປໄປແລ້ວ ເຮົາຈັບຜິດຄຳເວົ້າຂອງທ່ານໄດ້ແລ້ວ ເຮົາຂົ່ມທ່ານໄດ້ແລ້ວ ຖ້າທ່ານມີຄວາມສາມາດກໍຈົ່ງຫາທາງແກ້ໄຂຄຳເວົ້າຫຼືປົດຕົນໃຫ້ພົ້ນຜິດເທີ້ນ" ແລ້ວພາກັນ ຫລີກໄປ ພວກສາວົກບໍ່ຍອມສັກກາຣະ ເຄົາລົບ ນັບຖື ບູຊາຄູປູຣະນະ ກັດສະປະດ້ວຍອາການແນວນີ້ ແລະສາວົກທັງຫລາຍ ບໍ່ສັກກາຣະ ເຄົາລົບແລ້ວ ກໍບໍ່ອາໄສຄູປູຣະນະ ກັດສະປະຢູ່ ຄູປູຣະນະກັດສະປະກໍບໍ່ໂກດ ຍ້ອນເປັນການຕຳໜິທີ່ຊອບທຳ"

## ຄວາມເຄົາລົບໃນພຣະພຸດທະເຈົ້າ

[໔໔໐] ສະມະນະພາມລາງພວກກ່າວແນວນີ້ວ່າ "ພຣະສະມະນະໂຄດົມພຣະອົງນີ້ ຊົງເປັນເຈົ້າໝູ່ເຈົ້າຄະນະ ຊົງເປັນຄະນາຈານ ເປັນຜູ້ມີຊື່ສຽງ ມີກຽດຕິຍົດ ເປັນເຈົ້າລັດທິ ຄົນຈຳນວນຫຼາຍຍ້ອງຍໍກັນວ່າເປັນຄົນດີ ສາວົກທັງຫລາຍສັກກາຣະ ເຄົາລົບ ນັບຖື ບູຊາພຣະອົງ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສພຣະອົງຢູ່

ເລື້ອງເຄີຍມີມາແລ້ວ ພຣະສະມະນະໂຄດົມຊົງສະແດງທຳແກ່ບໍລິສັດຫຼາຍຮ້ອຍ ໃນບໍລິສັດນັ້ນ ສາວົກຂອງພຣະສະມະນະໂຄດົມຮູບໜຶ່ງໄອຂຶ້ນ ເພື່ອນພົມມະຈາຣີຮູບໜຶ່ງໃຊ້ເຂົ່າສະກິດເຕືອນໃຫ້ຮູ້ວ່າ "ທ່ານຈົ່ງງຽບສຽງ ຢ່າສົ່ງສຽງດັງໄປ ພຣະຜູ້ມີພຣະພາກເຈົ້າຜູ້ເປັນສາດສະດາຂອງເຮົາ ທັງຫລາຍກຳລັງສະແດງທຳ" ໃນເວລາທີ່ພຣະສະມະນະໂຄດົມຊົງສະແດງທຳແກ່ບໍລິສັດຫຼາຍຮ້ອຍ ຈະບໍ່ມີສຽງຈາມ ຫຼື ສຽງໄອຂອງສາວົກຂອງພຣະສະມະນະໂຄດົມເລີຍ ໝູ່ມະຫາຊົນມຸ້ງຫວັງ ທີ່ຈະຟັງທຳນັ້ນວ່າ "ເຮົາທັງຫລາຍຈັກຟັງທຳທີ່ພຣະຜູ້ມີພຣະພາກເຈົ້າຕັດແກ່ພວກເຮົາ" ບຸຣຸດບີບຮັງເຜີ້ງເຊິ່ງປາສະຈາກໂຕອ່ອນ ທີ່ສີ່ແຍກທາງຫລວງ ໝູ່ມະຫາຊົນກໍມຸ້ງຫວັງທີ່ຈະໄດ້ນ້ຳເຜີ້ງນັ້ນ ແມ່ນສັນໃດ ໃນເວລາທີ່ພຣະສະມະນະໂຄດົມຊົງສະແດງທຳແກ່ບໍລິສັດຫຼາຍຮ້ອຍ ກໍສັນນັ້ນ ຄືກັນ ຈະບໍ່ມີສຽງຈາມ ຫຼືສຽງໄອຂອງສາວົກຂອງພຣະສະມະນະໂຄດົມເລີຍ ໝູ່ມະຫາຊົນ ມຸ້ງຫວັງທີ່ຈະຟັງທຳນັ້ນວ່າ "ເຮົາທັງຫລາຍຈັກຟັງທຳທີ່ພຣະຜູ້ມີພຣະພາກເຈົ້າຈັກຕັດແກ່ພວກເຮົາ"

ແມ່ນສາວົກຂອງພຣະສະມະນະໂຄດົມ ຜູ້ບາດໝາງກັບເພື່ອນພົມມະຈາຣີແລ້ວລາສິກຂາອອກໄປເປັນຄະຫຼືຫັດ ກໍຍັງກ່າວສັນເສີນພຣະສາດສະດາ ກ່າວສັນເສີນພຣະທຳ ແລະກ່າວສັນເສີນພຣະສົງ ບໍ່ຕິຕຽນຜູ້ອື່ນ ຕິຕຽນສະເພາະຕົນເອງວ່າ "ເຖິງພວກເຮົາຈັກໄດ້ມາບວດໃນພຣະທຳວິໄນນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວແນວນີ້ ແຕ່ບໍ່ອາດປະພຶດພົມມະຈັນ ໃຫ້ບໍລິສຸດບໍລິບູນຈົນຕະຫຼອດຊີວິດໄດ້ ເປັນຄົນບໍ່ມີບຸນ ມີບຸນນ້ອຍສາແລ້ວ"

ສາວົກຂອງພຣະສະມະນະໂຄດົມເຫຼົ່ານັ້ນຈະເປັນອາຣາມິກຊົນກໍດີ ເປັນອຸປາສົກກໍດີ ກໍຍັງສະມາທານປະພຶດສິກຂາບົດ ໕ ປະການ ສາວົກທັງຫລາຍສັກກາຣະ ເຄົາລົບ ນັບຖື ບູຊາພຣະສະມະນະໂຄດົມດ້ວຍອາການແນວນີ້ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສ ພຣະສະມະນະໂຄດົມຢູ່"

## ທຳເປັນເຫດໃຫ້ທຳຄວາມເຄົາລົບ ໕ ປະການ

[໔໔໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸທາຍີ ທ່ານພິຈາລະນາເຫັນທຳຈັກປະການ ທີ່ມີຢູ່ໃນເຮົາ ເຊິ່ງເປັນເຫດໃຫ້ສາວົກຂອງເຮົາສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ນອກຈາກສັກ

ກາຣະ ເຄົາລົບແລ້ວກໍຍັງອາໄສເຮົາຢູ່"

ສະກຸລຸທາຍີປະຣິພາຊົກຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງພິຈາລະນາເຫັນທຳ ໕ ປະການໃນພຣະຜູ້ມີພຣະພາກເຈົ້າ ເຊິ່ງເປັນເຫດໃຫ້ສາວົກທັງຫລາຍສັກກາຣະເຄົາລົບ ນັບຖື ບູຊາພຣະຜູ້ມີພຣະພາກເຈົ້າ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສ ພຣະຜູ້ມີພຣະພາກເຈົ້າຢູ່

ທຳ ໕ ປະການ ອັນໃດແດ່ ຄື

໑. ພຣະຜູ້ມີພຣະພາກເຈົ້າສະເຫວີຍພຣະກະຍາຫານໜ້ອຍ ແລະຊົງກ່າວສັນເສີນຄວາມເປັນຜູ້ມີອາຫານໜ້ອຍ ຂ້າພຣະອົງພິຈາລະນາເຫັນທຳນີ້ໃນພຣະຜູ້ມີພຣະພາກເຈົ້າເປັນປະການທີ ໑ ເຊິ່ງເປັນເຫດໃຫ້ສາວົກທັງຫລາຍສັກກາຣະ ເຄົາລົບ ນັບຖື ບູຊາພຣະຜູ້ມີພຣະພາກເຈົ້າ ນອກຈາກສັກກາຣະເຄົາລົບ ແລ້ວກໍຍັງອາໄສພຣະຜູ້ມີພຣະພາກເຈົ້າຢູ່

໒. ພຣະຜູ້ມີພຣະພາກເຈົ້າຊົງສັນໂດດດ້ວຍຈີວອນຕາມມີຕາມໄດ້ ແລະ ຊົງກ່າວສັນເສີນຄວາມສັນໂດດດ້ວຍຈີວອນຕາມມີຕາມໄດ້ ຂ້າພຣະອົງພິຈາລະນາເຫັນທຳນີ້ໃນພຣະຜູ້ມີພຣະພາກເຈົ້າເປັນປະການທີ ໒ ເຊິ່ງເປັນເຫດໃຫ້ສາວົກ ທັງຫລາຍສັກກາຣະ ເຄົາລົບ ນັບຖື ບູຊາພຣະຜູ້ມີພຣະພາກເຈົ້ານອກຈາກ ສັກກາຣະ ເຄົາລົບແລ້ວກໍຍັງອາໄສພຣະຜູ້ມີພຣະພາກເຈົ້າຢູ່

໓. ພຣະຜູ້ມີພຣະພາກເຈົ້າຊົງສັນໂດດດ້ວຍບິນທະບາດຕາມມີຕາມໄດ້ ແລະ ຊົງກ່າວສັນເສີນຄວາມສັນໂດດດ້ວຍບິນທະບາດຕາມມີຕາມໄດ້ ຂ້າພຣະອົງພິຈາລະນາເຫັນທຳນີ້ໃນພຣະຜູ້ມີພຣະພາກເຈົ້າເປັນປະການທີ ໓ ເຊິ່ງເປັນເຫດໃຫ້ສາວົກທັງຫລາຍສັກກາຣະ ເຄົາລົບ ນັບຖື ບູຊາພຣະຜູ້ມີພຣະພາກເຈົ້າ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສພຣະຜູ້ມີພຣະພາກເຈົ້າຢູ່

໔. ພຣະຜູ້ມີພຣະພາກເຈົ້າຊົງສັນໂດດດ້ວຍເສນາສະນະຕາມມີຕາມໄດ້ ແລະຊົງກ່າວສັນເສີນຄວາມສັນໂດດດ້ວຍເສນາສະນະຕາມມີຕາມໄດ້ ຂ້າພຣະອົງພິຈາລະນາເຫັນທຳນີ້ໃນພຣະຜູ້ມີພຣະພາກເຈົ້າເປັນປະການທີ ໔ ເຊິ່ງເປັນເຫດໃຫ້ສາວົກທັງຫລາຍສັກກາຣະ ເຄົາລົບ ນັບຖື ບູຊາພຣະຜູ້ມີພຣະພາກເຈົ້າ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສພຣະຜູ້ມີພຣະພາກເຈົ້າຢູ່

໕. ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ສະຫງັດ ແລະ ຊົງກ່າວສັນເສີນຄວາມສະ

ຫງັດ ຂ້າພຣະອົງພິຈາລະນາເຫັນທຳນີ້ໃນພຣະຜູ້ມີພຣະພາກເຈົ້າເປັນປະການທີ ໕ ເຊິ່ງເປັນເຫດໃຫ້ສາ ວົກທັງຫລາຍສັກກາຣະ ເຄົາລົບ ນັບຖື ບູຊາພຣະຜູ້ມີພຣະພາກເຈົ້າ ນອກຈາກສັກກາຣະເຄົາ ລົບແລ້ວກໍຍັງອາໄສພຣະຜູ້ມີພຣະພາກເຈົ້າຢູ່

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງພິຈາລະນາເຫັນທຳ ໕ ປະການນີ້ແລ ທີ່ມີຢູ່ໃນພຣະຜູ້ມີພຣະພາກເຈົ້າເຊິ່ງເປັນເຫດໃຫ້ສາວົກທັງຫລາຍສັກກາຣະ ເຄົາລົບ ນັບຖື ບູຊາ ນອກຈາກ ສັກກາຣະ ເຄົາລົບແລ້ວກໍຍັງອາໄສພຣະຜູ້ມີພຣະພາກເຈົ້າຢູ່"

[໔໔໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸທາຍີ ຖ້າສາວົກທັງຫລາຍຈະເພິ່ງສັກກາຣະເຄົາລົບ ນັບຖື ບູຊາເຮົາ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສເຮົາຢູ່ດ້ວຍເຂົ້າໃຈ ດັ່ງນີ້ວ່າ "ພຣະສະມະນະໂຄດົມສະເຫວີຍພຣະກະຍາຫານໜ້ອຍ ແລະຊົງກ່າວສັນເສີນຄວາມເປັນຜູ້ມີອາຫານໜ້ອຍ" ອັນໜຶ່ງ ສາວົກທັງຫລາຍຂອງເຮົາສັນອາຫານພຽງ ໑ ໂກສະ ກໍມີ ພຽງເຄິ່ງໂກສະກໍມີ ພຽງທໍ່ຜົນໝາກຕູມກໍມີ ພຽງເຄິ່ງຜົນໝາກຕູມກໍມີ ສ່ວນເຮົາຊິບາງເທື່ອສັນອາຫານສະເໝີຂອບປາກບາດນີ້ກໍມີ ຍິ່ງກວ່າກໍມີ ຖ້າສາວົກທັງຫລາຍຈະເພິ່ງສັກກາຣະ ເຄົາລົບ ນັບຖືບູຊາເຮົາ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສເຮົາຢູ່ດ້ວຍເຂົ້າໃຈດັ່ງນີ້ວ່າ "ພຣະສະມະນະໂຄດົມສະເຫວີຍພຣະກະຍາຫານໜ້ອຍ ແລະ ຊົງກ່າວສັນເສີນຄວາມເປັນຜູ້ມີອາຫານໜ້ອຍ" ສາວົກທັງຫລາຍຂອງເຮົາຜູ້ທີ່ສັນອາຫານພຽງ ໑ ໂກສະແດ່ ພຽງເຄິ່ງໂກສະແດ່ ພຽງທໍ່ຜົນໝາກຕູມແດ່ ພຽງເຄິ່ງຜົນໝາກຕູມແດ່ ກໍຄົງຈະບໍ່ສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ແລ້ວອາໄສເຮົາຢູ່ໂດຍທຳນີ້ (໑)

ຖ້າສາວົກທັງຫລາຍຈະເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ນອກຈາກສັກກາຣະເຄົາລົບແລ້ວກໍຍັງອາໄສເຮົາຢູ່ດ້ວຍເຂົ້າໃຈດັ່ງນີ້ວ່າ "ພຣະສະມະນະໂຄດົມຊົງສັນໂດດດ້ວຍຈີວອນຕາມມີຕາມໄດ້ ແລະ ຊົງກ່າວສັນເສີນຄວາມສັນໂດດດ້ວຍຈີວອນຕາມມີຕາມໄດ້" ອັນໜຶ່ງສາວົກທັງຫລາຍຂອງເຮົາເປັນຜູ້ຖືຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ທັງຄອງຈີວອນເສົ້າໝອງດ້ວຍທ່ານເຫຼົ່ານັ້ນເລືອກເກັບຜ້າທີ່ບໍ່ມີຊາຍຈາກປ່າຊ້າແດ່ ຈາກກອງຂີ້ເຫຍື້ອແດ່ ຈາກຮ້ານຕະຫລາດແດ່ ນຳມາເຮັດເປັນຜ້າສັງຄາຕິໃຊ້ກໍມີ ສ່ວນເຮົາຊິບາງເວລາກໍໃຊ້ຄະຫະບໍດີຈີວອນເນື້ອແໜນຫຍິບດ້ວຍເສັ້ນດ້າຍໝຽວ ເສັ້ນດ້າຍລະອຽດເຊັ່ນກັບຂົນນ້ຳເຕົ້າ ຖ້າສາວົກທັງຫລາຍຈະເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ນອກຈາກສັກກາຣະ ເຄົາລົບແລ້ວກໍອາໄສເຮົາຢູ່ດ້ວຍເຂົ້າໃຈດັ່ງນີ້ວ່າ "ພຣະສະມະນະໂຄດົມຊົງສັນໂດດດ້ວຍຈີວອນຕາມມີຕາມໄດ້ ແລະ ຊົງກ່າວສັນເສີນຄວາມສັນໂດດດ້ວຍຈີວອນຕາມມີຕາມໄດ້" ສາວົກທັງຫລາຍຂອງເຮົາຜູ້ທີ່ຖືຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ຜູ້ຊົງຈີວອນເສົ້າໝອງ ເລືອກເກັບຜ້າທີ່ບໍ່ມີຊາຍຈາກປ່າຊ້າແດ່ ຈາກກອງຂີ້ເຫຍື້ອແດ່ ຈາກຮ້ານຕະຫລາດແດ່ ມາເຮັດເປັນຜ້າສັງຄາຕິໃຊ້ ກໍຄົງຈະບໍ່ສັກກາຣະ ເຄົາລົບ ນັບຖື

ບູຊາເຮົາ ແລ້ວອາໄສເຮົາຢູ່ໂດຍທຳນີ້ (໔)

ຖ້າສາວົກທັງຫລາຍຈະເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສເຮົາຢູ່ດ້ວຍເຂົ້າໃຈດັ່ງນີ້ວ່າ "ພຣະສະມະນະໂຄດົມຊົງສັນໂດດດ້ວຍບິນທະບາດຕາມມີຕາມໄດ້ ແລະ ຊົງກ່າວສັນເສີນຄວາມສັນໂດດດ້ວຍບິນທະບາດຕາມມີ ຕາມໄດ້" ອັນໜຶ່ງ ສາວົກທັງຫລາຍຂອງເຮົາເປັນຜູ້ຖືບິນທະບາດເປັນຂໍ້ວັດປະຕິບັດ ຖືການທ່ຽວບິນທະບາດ ຕາມລຳດັບຮ່ອມເປັນຂໍ້ວັດປະຕິບັດ ຍິນດີໃນຂໍ້ວັດປະຕິບັດຄືການຮັບພັດຕາຫານທັງດີທັງຊົ່ວ ທ່ານເຫຼົ່ານັ້ນເມື່ອເຂົ້າໄປເຖິງບໍລິເວນເຮືອນແລ້ວ ເຖິງໃຜຈະນິມົນດ້ວຍອາສະນະກໍບໍ່ຍິນດີ ສ່ວນເຮົາຊິ ບາງເທື່ອກໍສັນໃນບ່ອນນິມົນ ແຕ່ລ້ວນເປັນເຂົ້າສຸກແຫ່ງເຂົ້າວີດທີ່ເຂົານຳກາກອອກແລ້ວ ມີແກງແລະກັບຫຼາຍແນວ ຖ້າສາວົກທັງຫລາຍຈະເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສເຮົາຢູ່ດ້ວຍເຂົ້າໃຈດັ່ງນີ້ວ່າ "ພຣະສະມະນະໂຄດົມຊົງສັນໂດດດ້ວຍບິນທະບາດຕາມມີຕາມໄດ້ ແລະ ຊົງກ່າວສັນເສີນຄວາມສັນໂດດດ້ວຍ ບິນທະບາດຕາມມີຕາມໄດ້" ສາວົກທັງຫລາຍຂອງເຮົາຜູ້ທີ່ຖືບິນທະບາດເປັນຂໍ້ວັດປະຕິບັດ ຖືການທ່ຽວບິນທະບາດຕາມລຳດັບຮ່ອມເປັນຂໍ້ວັດປະຕິບັດ ຍິນດີໃນຂໍ້ວັດປະຕິບັດຄືການຮັບພັດຕາຫານທັງດີທັງຊົ່ວ ເມື່ອເຂົ້າໄປສູ່ບໍລິເວນເຮືອນແລ້ວ ເຖິງໃຜຈະນິມົນດ້ວຍອາສະນະກໍບໍ່ຍິນດີ ກໍຄົງຈະບໍ່ສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ແລ້ວອາໄສເຮົາຢູ່ໂດຍທຳນີ້ (໑)

ຖ້າສາວົກທັງຫລາຍຈະເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສເຮົາຢູ່ດ້ວຍເຂົ້າໃຈດັ່ງນີ້ວ່າ "ພຣະສະມະນະໂຄດົມຊົງສັນໂດດດ້ວຍ ເສນາສະນະຕາມມີຕາມໄດ້ ແລະ ຊົງກ່າວສັນເສີນຄວາມສັນໂດດດ້ວຍເສນາສະນະຕາມມີຕາມໄດ້" ອັນໜຶ່ງ ສາວົກທັງຫລາຍຂອງເຮົາຖືການຢູ່ເຫງົ້າໄມ້ເປັນຂໍ້ວັດປະຕິບັດ ຖືການຢູ່ກາງແຈ້ງເປັນຂໍ້ວັດປະຕິບັດ ທ່ານເຫຼົ່ານັ້ນບໍ່ເຂົ້າໄປທີ່ມຸງຕະຫຼອດ ໘ ເດືອນ ສ່ວນເຮົາຊິບາງເທື່ອຢູ່ໃນເຮືອນຍອດທີ່ສາບທາ ທັງຂ້າງໃນແລະຂ້າງນອກ ລົມເຂົ້າບໍ່ໄດ້ ມີລິ່ມຊິດສະນິດດີ ມີໜ້າຕ່າງເປີດອັດໄດ້ ຖ້າສາວົກ ທັງຫລາຍຈະເພິ່ງສັກກາຣະເຄົາລົບ ນັບຖື ບູຊາເຮົາ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສເຮົາຢູ່ດ້ວຍເຂົ້າໃຈດັ່ງນີ້ວ່າ "ພຣະສະມະນະໂຄດົມຊົງຍິນດີດ້ວຍເສນາສະນະຕາມມີຕາມໄດ້ ແລະ ຊົງກ່າວສັນເສີນຄວາມສັນໂດດດ້ວຍເສນາສະນະຕາມມີຕາມໄດ້" ສາວົກທັງຫລາຍຂອງເຮົາຜູ້ທີ່ຖືການຢູ່ເຫງົ້າໄມ້ເປັນຂໍ້ວັດປະຕິບັດ ຖືການຢູ່ໃນກາງແຈ້ງເປັນຂໍ້ວັດປະຕິບັດບໍ່ເຂົ້າໄປທີ່ມຸງຕະຫຼອດ ໘ ເດືອນ ກໍຄົງຈະບໍ່ສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ແລ້ວອາໄສເຮົາຢູ່ໂດຍທຳນີ້ (໔)

ຖ້າສາວົກທັງຫລາຍຈະເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສເຮົາຢູ່ດ້ວຍເຂົ້າໃຈດັ່ງນີ້ວ່າ "ພຣະສະມະນະໂຄດົມເປັນຜູ້ສະຫງັດ ແລະ ຊົງກ່າວສັນເສີນຄວາມສະຫງັດ" ອັນໜຶ່ງ ສາວົກທັງຫລາຍຂອງເຮົາຖືການຢູ່ປ່າເປັນຂໍ້ວັດປະຕິ

ບັດ ຖືເສນາສະນະອັນສະຫງັດຄືປ່າຊັດຢູ່ ທ່ານເຫຼົ່ານັ້ນຍ່ອມມາປະຊຸມທ່າມກາງສົງສະເພາະເວລາສູດປາຕິໂມກທຸກເຄິ່ງເດືອນ ສ່ວນເຮົາຊິບາງເວລາກໍຫຼາຍໄປດ້ວຍພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ເດຍຣະຖີ ສາວົກຂອງເດຍຣະຖີ ຖ້າສາວົກທັງຫລາຍຈະເພິ່ງສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສເຮົາຢູ່ດ້ວຍເຂົ້າໃຈດັ່ງນີ້ວ່າ “ພຣະສະມະນະໂຄດົມເປັນຜູ້ສະຫງັດ ແລະຊົງກ່າວສັນເສີນຄວາມສະຫງັດ” ສາວົກທັງຫລາຍຂອງເຮົາຜູ້ທີ່ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຖືເສນາສະນະອັນສະຫງັດຄືປ່າຊັດຢູ່ ຍ່ອມມາປະຊຸມທ່າມກາງສົງສະເພາະເວລາສູດປາຕິໂມກທຸກເຄິ່ງເດືອນ ກໍຄົງຈະບໍ່ສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ແລ້ວອາໄສເຮົາຢູ່ໂດຍທຳນີ້ (໕)

ອຸທາຍີ ສາວົກທັງຫລາຍຍ່ອມບໍ່ສັກກາຣະ ເຄົາລົບ ນັບຖື ບູຊາເຮົາແລ້ວອາໄສເຮົາຢູ່ໂດຍທຳ ໕ ປະການນີ້ ດ້ວຍອາການແນວນີ້

## ທຳເປັນເຫດໃຫ້ທຳຄວາມເຄົາລົບປະການອື່ນ ໆ

[໔໔໓] ອຸທາຍີ ມີທຳ ໕ ປະການອື່ນອີກເຊິ່ງເປັນເຫດໃຫ້ສາວົກທັງຫລາຍຂອງເຮົາສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສເຮົາຢູ່

ທຳ ໕ ປະການ ອັນໃດແດ່

ຄື ໃນທຳວິໄນນີ້

໑. ສາວົກທັງຫລາຍຂອງເຮົາຍ່ອມສັນເສີນ (ເຮົາ) ໃນອະທິສີນວ່າ “ພຣະສະມະນະໂຄດົມເປັນຜູ້ມີສີນ ປະກອບດ້ວຍສີລຂັນຢ່າງຍິ່ງ” ການທີ່ສາວົກທັງຫລາຍຂອງເຮົາສັນເສີນ(ເຮົາ) ໃນອະທິສີລວ່າ “ພຣະສະມະນະໂຄດົມເປັນຜູ້ມີສີນ ປະກອບດ້ວຍສີລຂັນຢ່າງຍິ່ງ” ນີ້ແລ ເປັນທຳປະການທີ ໑ ເຊິ່ງເປັນເຫດໃຫ້ ສາວົກທັງຫລາຍຂອງເຮົາສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ນອກຈາກ ສັກກາຣະ ເຄົາລົບແລ້ວກໍຍັງອາໄສເຮົາຢູ່

[໔໔໔] ໒. ສາວົກທັງຫລາຍຂອງເຮົາຍ່ອມສັນເສີນ (ເຮົາ) ໃນຍານທັດສະນະອັນປະເສີດວ່າ “ພຣະສະມະນະໂຄດົມເມື່ອຊົງຮູ້ເອງກໍຕັດວ່າ “ເຮົາຮູ້” ເມື່ອຊົງເຫັນເອງກໍຕັດວ່າ “ເຮົາເຫັນ” ຊົງສະແດງທຳເພື່ອຄວາມຮູ້ຍິ່ງ ບໍ່ແມ່ນຊົງສະແດງເພື່ອຄວາມບໍ່ຮູ້ຍິ່ງ ຊົງສະແດງທຳມີເຫດ ບໍ່ແມ່ນຊົງສະແດງທຳບໍ່ມີເຫດ ຊົງສະແດງທຳມີປາຕິຫາຣິຍ໌ ບໍ່ແມ່ນຊົງສະແດງທຳບໍ່ມີປາຕິຫາຣິຍ໌” ການທີ່ສາວົກທັງຫລາຍຂອງເຮົາສັນເສີນ (ເຮົາ) ໃນຍານທັດສະນະອັນປະເສີດ ວ່າ “ພຣະສະມະນະໂຄດົມເມື່ອຊົງຮູ້ເອງກໍຕັດວ່າ “ເຮົາຮູ້” ເມື່ອຊົງເຫັນເອງກໍ ຕັດວ່າ “ເຮົາເຫັນ” ຊົງສະແດງທຳເພື່ອຄວາມຮູ້ຍິ່ງ ບໍ່ແມ່ນຊົງສະແດງເພື່ອຄວາມບໍ່ຮູ້ຍິ່ງ ຊົງສະແດງທຳມີເຫດ ບໍ່ແມ່ນຊົງ

ສະແດງທຳບໍ່ມີເຫດ ຊົງສະແດງທຳມີປາຕິຫານ ບໍ່ແມ່ນຊົງສະແດງທຳບໍ່ມີປາຕິຫານ" ນີ້ແລ ເປັນທຳປະການທີ ໔ ເຊິ່ງເປັນເຫດໃຫ້ສາວົກທັງຫລາຍຂອງເຮົາສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສ ເຮົາຢູ່

[໔໔໕] ໕. ສາວົກທັງຫລາຍຂອງເຮົາຍ່ອມສັນເສີນ (ເຮົາ) ໃນອະທິປັນຍາວ່າ "ພຣະສະມະນະໂຄດົມຊົງມີພຣະປັນຍາ ຊົງປະກອບດ້ວຍພຣະປັນຍາຂັນອັນຍິ່ງ ເປັນໄປບໍ່ໄດ້ເລີຍທີ່ພຣະສະມະນະໂຄດົມຈັກບໍ່ຊົງເລັງເຫັນຄຳເວົ້າທີ່ຍັງບໍ່ມາເຖິງ ຫຼື ຈັກບໍ່ຊົງຂົ່ມຄຳໂຕ້ຖຽງຂອງຝ່າຍອື່ນທີ່ເກີດຂຶ້ນແລ້ວ ໃຫ້ເປັນການ ຖືກຕ້ອງ ມີເຫດຜົນດີ" ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ມີແດ່ບໍທີ່ສາວົກທັງຫລາຍຂອງເຮົາ ເມື່ອຮູ້ ເຫັນແນວນີ້ ຈະເພິ່ງເວົ້າສອດຂຶ້ນມາ"

"ບໍ່ມີ ຂ້ານ້ອຍ"

"ອຸທາຍີ ເຮົາບໍ່ຫວັງການພ່ຳສອນຈາກສາວົກທັງຫລາຍ ແທ້ທີ່ຈິງສາວົກທັງຫລາຍ ຍ່ອມຫວັງການພ່ຳສອນຈາກເຮົາທີ່ນັ້ນ ການທີ່ສາວົກທັງຫລາຍຂອງເຮົາ ຍ່ອມສັນເສີນ (ເຮົາ) ໃນອະທິປັນຍາວ່າ "ພຣະສະມະນະໂຄດົມຊົງມີພຣະປັນຍາ ຊົງປະກອບດ້ວຍພຣະປັນຍາຂັນອັນຍິ່ງ ເປັນໄປບໍ່ໄດ້ເລີຍທີ່ພຣະສະມະນະໂຄດົມຈັກບໍ່ຊົງເລັງເຫັນຄຳເວົ້າທີ່ຍັງບໍ່ມາເຖິງ ຫຼື ຈັກບໍ່ຊົງຂົ່ມຄຳໂຕ້ຖຽງຂອງຝ່າຍອື່ນທີ່ເກີດຂຶ້ນແລ້ວ ໃຫ້ເປັນການຖືກຕ້ອງ ມີເຫດຜົນດີ" ນີ້ແລ ເປັນທຳປະການທີ ໕ ເຊິ່ງເປັນເຫດໃຫ້ສາວົກທັງຫລາຍຂອງເຮົາສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສເຮົາຢູ່

[໔໔໖] ໖. ສາວົກທັງຫລາຍຂອງເຮົາຜູ້ຖືກທຸກຖວມທັບແລ້ວ ຖືກທຸກຄອບງຳແລ້ວຍ້ອນທຸກໃດ ທ່ານເຫຼົ່ານັ້ນຈຶ່ງເຂົ້າມາຫາເຮົາແລ້ວຖາມເຖິງທຸກຂະອະຣິຍະສັດນັ້ນ ເຮົາຖືກທ່ານເຫຼົ່ານັ້ນຖາມເຖິງທຸກຂະອະຣິຍະສັດກໍຕອບໄດ້ ເຮົາເຮັດໃຫ້ທ່ານເຫຼົ່ານັ້ນມີຈິດຍິນດີແຊ່ມຊື່ນດ້ວຍການຕອບບັນຫາ ທ່ານເຫຼົ່ານັ້ນເຂົ້າມາຫາເຮົາແລ້ວຖາມເຖິງທຸກຂະສະມຸໄທອະຣິຍະສັດ ຯລຯ ທຸກຂະນິໂຣດອະຣິຍະສັດ ຯລຯ ຖາມເຖິງທຸກຂະນິໂຣດຄາມິນີປະຕິທາອະຣິຍະສັດ ເຮົາຖືກທ່ານເຫຼົ່ານັ້ນຖາມເຖິງທຸກຂະນິໂຣດຄາມິນີປະຕິປະທາອະຣິຍະສັດກໍຕອບໄດ້ ເຮົາເຮັດໃຫ້ທ່ານເຫຼົ່ານັ້ນມີຈິດຍິນດີ ແຊ່ມຊື່ນດ້ວຍການຕອບບັນຫາ ການທີ່ສາວົກທັງຫລາຍຂອງເຮົາຜູ້ຖືກທຸກ ຖວມທັບແລ້ວ ຖືກທຸກຄອບງຳແລ້ວຍ້ອນທຸກໃດ ທ່ານເຫຼົ່ານັ້ນຈຶ່ງເຂົ້າມາຫາເຮົາແລ້ວ ຖາມເຖິງທຸກຂະອະຣິຍະສັດນັ້ນ ເຮົາຖືກທ່ານເຫຼົ່ານັ້ນຖາມເຖິງ ທຸກຂະອະຣິຍະສັດກໍຕອບໄດ້ ເຮົາເຮັດໃຫ້ທ່ານເຫຼົ່ານັ້ນມີຈິດຍິນດີແຊ່ມຊື່ນດ້ວຍການ ຕອບບັນຫາ ທ່ານເຫຼົ່ານັ້ນເຂົ້າມາຫາເຮົາແລ້ວຖາມເຖິງທຸກຂະສະມຸໄທອະຣິຍະສັດ ຯລຯ ທຸກຂະນິໂຣດອະຣິຍະສັດ ຯລຯ ຖາມເຖິງທຸກຂະນິໂຣດຄາມິນີປະຕິປະທາອະຣິຍະສັດ ເຮົາຖືກທ່ານເຫຼົ່ານັ້ນຖາມເຖິງທຸກຂະນິໂຣດຄາມິນີປະຕິປະທາອະຣິຍະສັດແລ້ວກໍຕອບໄດ້ ເຮົາເຮັດໃຫ້ທ່ານເຫຼົ່ານັ້ນມີຈິດຍິນດີແຊ່ມຊື່ນດ້ວຍການຕອບບັນຫາ ນີ້ແລ ເປັນ

ທຳປະການທີ ໔ ເຊິ່ງເປັນເຫດໃຫ້ສາວົກທັງຫລາຍຂອງເຮົາສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສ ເຮົາຢູ່

[໔໔໗] ໕. ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມຍ່ອມຈະເລີນສະຕິປັດຖານ ໔ ປະການ

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫລາຍຢູ່ ໆລໆ

໓. ພິຈາລະນາເຫັນຈິດໃນຈິດຢູ່ ໆລໆ

໔. ພິຈາລະນາເຫັນທຳໃນທຳທັງຫລາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ຍ້ອນຈະເລີນສະຕິປັດຖານ ໔ ປະການນັ້ນແລ ສາວົກຂອງເຮົາເປັນຈຳນວນຫລາຍຈຶ່ງໄດ້ບັນລຸທີ່ສຸດແຫ່ງອະພິນຍາ ແລະ ອະພິນຍາປາຣະມີຢູ່

ອີກປະການໜຶ່ງ ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມຈະເລີນສັມມັບປະທານ ໔ ປະການ

ຄື ພິກຂຸໃນທຳວິໄນນີ້

໑. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ໓ ປະຄອງຈິດ ມຸ້ງໝັ້ນ ເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ

໒. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ

໓. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອທຳກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ

໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍ ພິນໂຍພາບ ໄພບູນ ຈະເລີນເຕັມທີ່ ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

ຍ້ອນຈະເລີນສັມມັບປະທານ ໔ ປະການນັ້ນແລ ສາວົກຂອງເຮົາເປັນຈຳນວນຫລາຍຈຶ່ງໄດ້ບັນລຸທີ່ສຸດແຫ່ງອະພິນຍາ ແລະ ອະພິນຍາປາຣະມີຢູ່

ອີກປະການໜຶ່ງ ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມຈະເລີນອິດທິບາດ ໔ ປະການ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກສັນທະແລະຄວາມພຽນສ້າງສັນ)

໒. ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກວິຣິຍະແລະຄວາມພຽນສ້າງສັນ)

໓. ຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກຈິດຕະແລະຄວາມພຽນສ້າງສັນ)

໔. ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານ (ສະມາທິທີ່ເກີດຈາກວິມັງສາແລະຄວາມພຽນສ້າງສັນ)

ຍ້ອນຈະເລີນອິດທິບາດ ໔ ປະການນັ້ນແລ ສາວົກຂອງເຮົາເປັນຈຳນວນຫລາຍຈຶ່ງໄດ້ບັນລຸທີ່ສຸດແຫ່ງອະພິນຍາ ແລະ ອະພິນຍາປາຣະມີຢູ່

ອີກປະການໜຶ່ງ ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມຈະເລີນອິນຊີ ໕ ປະການ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສັດທິນຊີທີ່ໃຫ້ເຖິງຄວາມສະງົບ ໃຫ້ເຖິງຄວາມຕັດສະຣູ້
໒. ຈະເລີນວິຣິຍິນຊີ ฯລฯ
໓. ຈະເລີນສະຕິນຊີ ฯລฯ
໔. ຈະເລີນສະມາທິນຊີ ฯລฯ
໕. ຈະເລີນປັນຍິນຊີ ທີ່ຈະໃຫ້ເຖິງຄວາມສະງົບ ໃຫ້ເຖິງຄວາມຕັດສະຣູ້

ຍ້ອນຈະເລີນອິນຊີ ໕ ປະການນັ້ນແລ ສາວົກຂອງເຮົາເປັນຈຳນວນຫລາຍຈຶ່ງໄດ້ບັນລຸທີ່ສຸດແຫ່ງອະພິນຍາແລະອະພິນຍາປາຣະມີຢູ່

ອີກປະການໜຶ່ງ ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມຈະເລີນພະລະ (ທຳອັນເປັນກຳລັງ) ໕ ປະການ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສັດທາພະລະທີ່ໃຫ້ເຖິງຄວາມສະງົບ ໃຫ້ເຖິງຄວາມຕັດສະຣູ້
໒. ຈະເລີນວິຣິຍະພະລະ ฯลฯ
໓. ຈະເລີນສະຕິພະລະ ฯลฯ
໔. ຈະເລີນສະມາທິພະລະ ฯลฯ
໕. ຈະເລີນປັນຍາພະລະ ທີ່ຈະໃຫ້ເຖິງຄວາມສະງົບ ໃຫ້ເຖິງຄວາມຕັດສະຣູ້

ຍ້ອນຈະເລີນພະລະ ໕ ປະການນັ້ນແລ ສາວົກຂອງເຮົາເປັນຈຳນວນຫລາຍຈຶ່ງໄດ້ບັນລຸທີ່ສຸດແຫ່ງອະພິນຍາແລະອະພິນຍາປາຣະມີຢູ່

ອີກປະການໜຶ່ງ ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມຈະເລີນໂພດຊົງ (ອົງທຳແຫ່ງການຕັດສະຣູ້) ໗ ປະການ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ (ຄວາມສະລະ)
໒. ຈະເລີນທຳມະວິຈະຍະສຳໂພດຊົງ ฯลฯ
໓. ຈະເລີນວິຣິຍະສຳໂພດຊົງ ฯลฯ
໔. ຈະເລີນປີຕິສຳໂພດຊົງ ฯลฯ
໕. ຈະເລີນປັດສັດທິສຳໂພດຊົງ ฯลฯ
໖. ຈະເລີນສະມາທິສຳໂພດຊົງ ฯลฯ
໗. ຈະເລີນອຸເປກຂາສຳໂພດຊົງ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ (ຄວາມສະລະ)

ຍ້ອນຈະເລີນໂພດຊົງ ໗ ປະການນັ້ນແລ ສາວົກຂອງເຮົາເປັນຈຳນວນຫລາຍຈຶ່ງໄດ້ບັນລຸທີ່ສຸດແຫ່ງອະພິນຍາແລະອະພິນຍາປາຣະມີຢູ່

ອີກປະການໜຶ່ງ ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມຈະເລີນອະຣິຍະມັກມີອົງ ໘

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິ     ໔. ຈະເລີນສຳມາສັງກັບປະ
໒. ຈະເລີນສຳມາວາຈາ     ໔. ຈະເລີນສຳມາກຳມັນຕະ
໕. ຈະເລີນສຳມາອາຊີວະ     ໖. ຈະເລີນສຳມາວາຍາມະ
໗. ຈະເລີນສຳມາສະຕິ     ໘. ຈະເລີນສຳມາສະມາທິ

ຍ້ອນຈະເລີນອະຣິຍະມັກມີອົງ ໘ ນັ້ນແລ ສາວົກຂອງເຮົາເປັນຈຳນວນຫລາຍຈຶ່ງໄດ້ບັນລຸທີ່ສຸດແຫ່ງອະພິນຍາແລະອະພິນຍາປາຣະມີຢູ່

[໔໔໘] ອີກປະການໜຶ່ງ ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມ ຈະເລີນວິໂມກ (ທຳເຄື່ອງລຸດພົ້ນ) ໘ ປະການ ຄື

໑. ສາວົກຜູ້ມີຣູບເຫັນຣູບທັງຫລາຍ ນີ້ເປັນວິໂມກປະການທີ ໑
໔. ສາວົກຜູ້ມີອະຣູປະສັນຍາພາຍໃນເຫັນຣູບທັງຫລາຍພາຍນອກ ນີ້ເປັນວິໂມກປະການທີ ໔
໒. ສາວົກນ້ອມໃຈໄປວ່າ "ງາມ" ນີ້ເປັນວິໂມກປະການທີ ໒
໔. ສາວົກບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ "ອາກາດຫາບ່ອນສຸດບໍ່ໄດ້" ຢູ່ ຍ້ອນລ່ວງຣູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ ນີ້ເປັນວິໂມກປະການທີ ໔
໕. ສາວົກລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານຢູ່ໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ຢູ່ ນີ້ເປັນວິໂມກປະການທີ ໕
໖. ສາວົກລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ນີ້ເປັນວິໂມກປະການທີ ໖
໗. ສາວົກລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸ ເນວະສັນຍານາສັນຍາຍະຕະນະຊານຢູ່ ນີ້ເປັນວິໂມກປະການທີ ໗
໘. ສາວົກລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາເວທະຍິຕນິໂຣດຢູ່ ນີ້ເປັນວິໂມກປະການທີ ໘

ຍ້ອນຈະເລີນວິໂມກ ໘ ປະການນັ້ນແລ ສາວົກຂອງເຮົາເປັນຈຳນວນຫລາຍຈຶ່ງໄດ້ບັນລຸທີ່ສຸດ ແຫ່ງອະພິນຍາແລະອະພິນຍາປາຣະມີຢູ່

[໔໔໙] ອີກປະການໜຶ່ງ ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມ ຈະເລີນອະພິພາຍະຕະນະ໑ ໘ ປະການ ຄື

໑. ສາວົກຜູ້ໜຶ່ງມີຮູບສັນຍາພາຍໃນ ເຫັນຮູບທັງຫລາຍພາຍນອກຂະໜາດນ້ອຍ ມີສີດີບໍ່ດີ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໑

໒. ສາວົກຜູ້ໜຶ່ງມີຮູບສັນຍາພາຍໃນ ເຫັນຮູບທັງຫລາຍພາຍນອກຂະໜາດໃຫຍ່ ມີສີດີບໍ່ດີ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໒

໓. ສາວົກຜູ້ໜຶ່ງມີອະຮູປະສັນຍາພາຍໃນ໑ ເຫັນຮູບທັງຫລາຍພາຍນອກຂະໜາດນ້ອຍ ມີສີດີບໍ່ດີ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໓

໔. ສາວົກຜູ້ໜຶ່ງມີອະຮູປະສັນຍາພາຍໃນ ເຫັນຮູບທັງຫລາຍພາຍນອກຂະໜາດໃຫຍ່ ມີສີດີບໍ່ດີ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໔

໕. ສາວົກຜູ້ໜຶ່ງມີອະຮູປະສັນຍາພາຍໃນ ເຫັນຮູບທັງຫລາຍພາຍນອກທີ່ຂຽວ ມີສີຂຽວ ປຽບດ້ວຍຂອງຂຽວ ມີສີຂຽວເຂັ້ມ ດອກຜັກຕົບທີ່ຂຽວ ມີສີ ຂຽວ ປຽບດ້ວຍຂອງຂຽວ ມີສີຂຽວເຂັ້ມຫຼືຜ້າເມືອງພາຣານະສີອັນ ມີຊື້ນລະອຽດທັງ ໒ ດ້ານ ທີ່ຂຽວ ມີສີຂຽວ ປຽບດ້ວຍຂອງຂຽວ ມີສີຂຽວເຂັ້ມ ແມ່ນສັນໃດ ສາວົກຜູ້ໜຶ່ງມີອະຮູປະສັນຍາພາຍໃນ ກໍສັນນັ້ນຄືກັນ ເຫັນຮູບທັງ ຫລາຍພາຍນອກທີ່ຂຽວ ມີສີຂຽວ ປຽບດ້ວຍຂອງຂຽວ ມີສີຂຽວເຂັ້ມ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໕

໖. ສາວົກຜູ້ໜຶ່ງມີອະຮູປະສັນຍາພາຍໃນ ເຫັນຮູບທັງຫລາຍພາຍນອກທີ່ເຫຼືອງ ມີສີເຫຼືອງ ປຽບດ້ວຍຂອງເຫຼືອງ ມີສີເຫຼືອງເຂັ້ມ ດອກກັນນິກາຣທີ່ ເຫຼືອງ ມີສີເຫຼືອງ ປຽບດ້ວຍຂອງເຫຼືອງ ມີສີເຫຼືອງເຂັ້ມຫຼືຜ້າ ເມືອງພາຣານະສີອັນມີຊື້ນລະອຽດທັງ ໒ ດ້ານ ທີ່ເຫຼືອງ ມີສີເຫຼືອງ ປຽບດ້ວຍຂອງເຫຼືອງ ມີສີເຫຼືອງເຂັ້ມ ແມ່ນສັນໃດ ສາວົກຜູ້ໜຶ່ງມີ ອະຮູປະສັນຍາພາຍໃນ ກໍສັນນັ້ນຄືກັນ ເຫັນຮູບທັງຫລາຍພາຍນອກທີ່ ເຫຼືອງ ມີສີເຫຼືອງ ປຽບດ້ວຍຂອງເຫຼືອງ ມີສີ

ເຫຼືອງເຂັ້ມ ຄອບງຳ ຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໖

໗. ສາວົກຜູ້ໜຶ່ງມີອະຣູປະສັນຍາພາຍໃນ ເຫັນຮູບທັງຫລາຍພາຍນອກທີ່ແດງ ມີສີ ແດງ ປຽບດ້ວຍຂອງແດງ ມີສີແດງເຂັ້ມ ດອກຊະບາທີ່ແດງ ມີສີແດງ ປຽບດ້ວຍຂອງແດງ ແລະມີສີແດງເຂັ້ມ ຫຼືຜ້າເມືອງພາຣານະສີອັນມີຊື້ນລະອຽດທັງ ໔ ດ້ານ ທີ່ແດງ ມີສີແດງ ປຽບດ້ວຍຂອງແດງ ມີສີແດງເຂັ້ມ ແມ່ນສັນໃດ ສາວົກຜູ້ໜຶ່ງມີອະຣູປະສັນຍາພາຍໃນ ກໍສັນນັ້ນຄືກັນ ເຫັນຮູບທັງຫລາຍພາຍນອກທີ່ແດງ ມີສີແດງ ປຽບດ້ວຍຂອງແດງ ມີສີແດງເຂັ້ມ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນ ອະພິພາຍະຕະນະປະການທີ ໗

໘. ສາວົກຜູ້ໜຶ່ງມີອະຣູປະສັນຍາພາຍໃນ ເຫັນຮູບທັງຫລາຍພາຍນອກສີຂາວ ມີສີຂາວ ປຽບດ້ວຍຂອງຂາວ ມີສີຂາວເຂັ້ມ ດາວປະກາຍພຣຶກທີ່ຂາວ ມີສີຂາວ ປຽບດ້ວຍຂອງຂາວ ແລະມີສີຂາວເຂັ້ມ ຫຼືຜ້າເມືອງພາຣານະສີອັນມີຊື້ນລະອຽດທັງ ໔ ດ້ານ ທີ່ຂາວ ມີສີຂາວ ປຽບດ້ວຍຂອງຂາວ ມີສີຂາວເຂັ້ມ ແມ່ນສັນໃດ ສາວົກຜູ້ໜຶ່ງມີອະຣູປະສັນຍາພາຍໃນ ກໍສັນນັ້ນ ຄືກັນ ເຫັນຮູບທັງຫລາຍພາຍນອກທີ່ຂາວ ມີສີຂາວ ປຽບດ້ວຍ ຂອງຂາວ ມີສີຂາວເຂັ້ມ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະປະການທີ ໘

ຍ້ອນຈະເລີນອະພິພາຍະຕະນະ ໘ ປະການນັ້ນແລ ສາວົກຂອງເຮົາເປັນຈຳນວນຫລາຍຈຶ່ງໄດ້ບັນລຸທີ່ສຸດແຫ່ງອະພິນຍາແລະອະພິນຍາປາຣະມີຢູ່

[໒໕໐] ອີກປະການໜຶ່ງ ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກ ທັງຫລາຍຂອງເຮົາຜູ້ປະຕິບັດຕາມຈະເລີນກະຊິນາຍະຕະນະ໑ (ບໍ່ເກີດແຫ່ງທຳທີ່ມີກະສິນເປັນອາລົມ) ໑໐ ປະການ ຄື

໑. ສາວົກຜູ້ໜຶ່ງຍ່ອມຮູ້ແຈ້ງປະຖະວີກະສິນ (ກະສິນຄືດິນ) ເບື້ອງເທິງ ເບື້ອງຕ່ຳ ເບື້ອງຂວາງ ບໍ່ມີສອງ ບໍ່ມີປະມານ

໒. ສາວົກຜູ້ໜຶ່ງຍ່ອມຮູ້ແຈ້ງ ອາໂປກະສິນ (ກະສິນຄືນ້ຳ) ຯລຯ

໓. ສາວົກຜູ້ໜຶ່ງຍ່ອມຮູ້ແຈ້ງ ເຕໂຊກະສິນ (ກະສິນຄືໄຟ) ຯລຯ

໔. ສາວົກຜູ້ໜຶ່ງຍ່ອມຮູ້ແຈ້ງ ວາໂຍກະສິນ (ກະສິນຄືລົມ) ໆລໆ
໕. ສາວົກຜູ້ໜຶ່ງຍ່ອມຮູ້ແຈ້ງ ນີລະກະສິນ (ກະສິນຄືສີຂຽວ) ໆລໆ
໖. ສາວົກຜູ້ໜຶ່ງຍ່ອມຮູ້ແຈ້ງ ປີຕະກະສິນ (ກະສິນຄືສີເຫຼືອງ) ໆລໆ
໗. ສາວົກຜູ້ໜຶ່ງຍ່ອມຮູ້ແຈ້ງ ໂລຫິຕະກະສິນ (ກະສິນຄືສີແດງ) ໆລໆ
໘. ສາວົກຜູ້ໜຶ່ງຍ່ອມຮູ້ແຈ້ງ ໂອທາຕະກະສິນ (ກະສິນຄືສີຂາວ) ໆລໆ
໙. ສາວົກຜູ້ໜຶ່ງຍ່ອມຮູ້ແຈ້ງ ອາກາສກະສິນ (ກະສິນຄືທີ່ວ່າງເປົ່າ) ໆລໆ
໑໐. ສາວົກຜູ້ໜຶ່ງຍ່ອມຮູ້ແຈ້ງ ວິນຍານກະສິນ (ກະສິນຄືວິນຍານ) ເບື້ອງເທິງ ເບື້ອງຕ່ຳ ເບື້ອງຂວາງ ບໍ່ມີສອງ ບໍ່ມີປະມານ

ຍ້ອນຈະເລີນກະສິນາຍະຕະນະ ໑໐ ປະການນັ້ນແລ ສາວົກຂອງເຮົາເປັນຈຳນວນຫລາຍ ຈຶ່ງໄດ້ບັນລຸທີ່ສຸດແຫ່ງອະພິນຍາແລະອະພິນຍາປາຣະມີຢູ່

## ຊານ ໔

[໔໕໑] ອີກປະການໜຶ່ງ ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍ ຂອງເຮົາຜູ້ປະຕິບັດຕາມ ຈະເລີນຊານ ໔ ປະການ

ຄື ພິກຂຸໃນທຳວິໄນນີ້

໑. ສະຫງັດຈາກກາມແລະອະກຸສົນທຳທັງຫລາຍແລ້ວ ບັນລຸປະຖົມຊານ ທີ່ມີວິຕົກ ວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ ທ່ານທຳກາຍນີ້ໃຫ້ຊຸ່ມຊື່ນ ເອີບອີ່ມ ດ້ວຍປີຕິແລະສຸກ ອັນເກີດຈາກວິເວກຮູ້ສຶກຊາບຊ່ານຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ປີຕິແລະສຸກອັນເກີດຈາກວິເວກ ຈະບໍ່ຖືກຕ້ອງ ພະນັກງານອາບນ້ຳ ຫຼືລູກມືພະນັກງານອາບນ້ຳຜູ້ຊ່ຽວຊານ ເທຜົງຖູໂຕລົງໃນພາ ຊະນະສຳລິດ ແລ້ວເອົານ້ຳປະພົມໃຫ້ຕິດເປັນກ້ອນ ພໍຕົກເຢັນກ້ອນຖູໂຕທີ່ຢາງຊຶມໄປຈັບ ກໍຕິດ ກັນໝົດ ບໍ່ກະຈາຍອອກ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ທຳກາຍນີ້ໃຫ້ຊຸ່ມຊື່ນ ເອີບອີ່ມ ດ້ວຍ ປີຕິແລະສຸກອັນເກີດຈາກວິເວກ ຮູ້ສຶກຊາບຊ່ານຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ປີຕິແລະສຸກອັນ ເກີດຈາກວິເວກຈະບໍ່ຖືກຕ້ອງ

໒. ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານ ໆລໆ ຢູ່ ທ່ານ ທຳກາຍນີ້ ໃຫ້ຊຸ່ມຊື່ນ ເອີບອີ່ມ ດ້ວຍປີຕິແລະສຸກອັນເກີດຈາກສະມາທິຮູ້ສຶກ ຊາບຊ່ານຢູ່ ບໍ່ມີສ່ວນໃດຂອງ ຮ່າງກາຍທີ່ປີຕິແລະສຸກອັນເກີດຈາກສະມາທິ ຈະບໍ່ຖືກຕ້ອງ ແມ່ນ້ຳເລິກ ເປັນວັງວົນ ບໍ່ມີທາງທີ່ ກະແສນ້ຳຈະໄຫຼ ເຂົ້າໄດ້ ທັງດ້ານຕາເວັນອອກ ດ້ານຕາເວັນຕົກ ດ້ານເໜືອ ແລະດ້ານໃຕ້ ຝົນ ກໍບໍ່ຕົກຕາມລະດູ ແຕ່ກະແສນ້ຳເຢັນພຸຂຶ້ນຈາກແມ່ນ້ຳນັ້ນແລ້ວເຮັດ ແມ່ນ້ຳນັ້ນໃຫ້ຊຸ່ມຊື່ນ ເອີບ ອາບ ເນືອງນອງໄປດ້ວຍນ້ຳເຢັນ ບໍ່ມີສ່ວນໃດ ຂອງແມ່ນ້ຳນັ້ນທີ່ນ້ຳເຢັນຈະບໍ່ຖືກຕ້ອງ ແມ່ນ

ສັນໃດ ພິກຂຸກໍສັນນັ້ນ ຄືກັນ ທຳກາຍນີ້ໃຫ້ຊຸ່ມຊື່ນ ເອີບອິ່ມ ດ້ວຍປີຕິແລະສຸກອັນເກີດຈາກສະມາທິຮູ້ສຶກຊາບຊ່ານຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ປີຕິ ແລະສຸກອັນເກີດຈາກສະມາທິຈະບໍ່ຖືກຕ້ອງ

໓. ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍບັນລຸຕະຕິຍະຊານ ຯລຯ ຢູ່ ທ່ານທຳກາຍນີ້ໃຫ້ຊຸ່ມຊື່ນ ເອີບອິ່ມ ດ້ວຍສຸກອັນບໍ່ມີປີຕິຮູ້ສຶກຊາບຊ່ານຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ສຸກອັນບໍ່ມີປີຕິຈະບໍ່ຖືກຕ້ອງ ໃນກໍບົວຂຽວ(ອຸບົນ) ກໍບົວຫລວງ(ປະທຸມະ) ຫຼືກໍບົວຂາວ(ບຸນທະຣິກ) ດອກບົວຂຽວ ດອກບົວຫລວງຫຼືດອກບົວຂາວບາງເຫຼົ່າທີ່ເກີດ ຈະເລີນໃຫຍ່ຂຶ້ນມາໃນນ້ຳ ຍັງບໍ່ພົ້ນນ້ຳ ຈົມຢູ່ໃຕ້ນ້ຳ ມີນ້ຳຫລໍ່ລ້ຽງໄວ້ ດອກບົວເຫຼົ່ານັ້ນຊຸ່ມຊື່ນ ເອີບອາບ ຊາບຊຶມດ້ວຍນ້ຳເຢັນຕັ້ງແຕ່ຍອດເຖິງເຫງົ້າ ບໍ່ມີສ່ວນໃດຂອງດອກບົວຂຽວດອກບົວຫລວງ ຫຼືດອກບົວຂາວທົ່ວທຸກດອກ ທີ່ນ້ຳເຢັນຈະບໍ່ຖືກຕ້ອງ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ທຳກາຍນີ້ໃຫ້ຊຸ່ມຊື່ນ ເອີບອິ່ມ ດ້ວຍສຸກອັນບໍ່ມີປີຕິຮູ້ສຶກຊາບຊ່ານຢູ່ ບໍ່ມີສ່ວນໃດຂອງຮ່າງກາຍທີ່ສຸກອັນບໍ່ມີປີຕິຈະບໍ່ຖືກຕ້ອງ

໔. ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດ ແລະ ໂທມະນັດດັບໄປກ່ອນ ພິກຂຸບັນລຸຈະຕຸດຖະຊານ ຯລຯ ຢູ່ ທ່ານມີໃຈອັນບໍລິສຸດຜຸດຜ່ອງ ນັ່ງແຜ່ໄປ ທົ່ວກາຍນີ້ ບໍ່ມີສ່ວນໃດຂອງຮ່າງກາຍທີ່ໃຈອັນບໍລິສຸດຜຸດຜ່ອງຈະບໍ່ ຖືກຕ້ອງ ບຸຣຸດນັ່ງໃຊ້ຜ້າຂາວຄຸມໂຕຕະຫຼອດຫົວ ບໍ່ມີສ່ວນໃດຂອງຮ່າງກາຍທີ່ຜ້າຂາວຈະບໍ່ປົກຄຸມ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ມີໃຈອັນບໍລິສຸດຜຸດຜ່ອງ ນັ່ງແຜ່ໄປທົ່ວກາຍນີ້ ບໍ່ມີສ່ວນໃດຂອງຮ່າງກາຍ ທີ່ໃຈອັນບໍລິສຸດຜຸດຜ່ອງຈະບໍ່ຖືກຕ້ອງ

ຍ້ອນປະຕິບັດຕາມຂໍ້ປະຕິບັດທີ່ເຮົາບອກແລ້ວຈະເລີນຊານ ໔ ປະການນັ້ນແລ ສາວົກຂອງເຮົາເປັນຈຳນວນຫລາຍຈຶ່ງໄດ້ບັນລຸທີ່ສຸດແຫ່ງອະພິນຍາແລະອະພິນຍາປາຣະມີຢູ່

## ວິດຊາ ໘ ປະການ

### ໑. ວິປັດສະນາຍານ

[໔໕໔] ອີກປະການໜຶ່ງ ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມຮູ້ແຈ້ງແນວນີ້ວ່າ "ກາຍຂອງເຮົານີ້ຄຸມກັນເປັນຮູບຮ່າງປະກອບຂຶ້ນຈາກມະຫາພູຕະຮູບ ໔ ເກີດຈາກມານດາບິດາ ຈະເລີນວັຍຍ້ອນເຂົ້າສຸກແລະເຂົ້າໜົມກຸມມາດ ບໍ່ທ່ຽງແທ້ ຕ້ອງອົບ ຕ້ອງນວດເຟັ້ນ ມີອັນແຕກກະຈັດກະຈາຍໄປເປັນທຳມະດາ ວິນຍານຂອງເຮົາອາໄສແລະເນື່ອງຢູ່ໃນກາຍນີ້" ແກ້ວໄພທູນອັນງົດງາມ ຕາມທຳມະຊາດມີແປດຫລ່ຽມ ທີ່ເຈຍຣະໄນດີແລ້ວ ສຸກໃສເປັນປະກາຍໄດ້ສັດສ່ວນ ມີດ້າຍສີຂຽວ ສີເຫຼືອງ ສີແດງ ສີຂາວ ຫຼືສີນວົນຮ້ອຍຢູ່ຂ້າງໃນ ຄົນຕາເຖິງຈັບແກ້ວໄພທູນນັ້ນວາງໄວ້ໃນມືແລ້ວພິຈາລະນາຮູ້ວ່າ "ແກ້ວໄພທູນ

ອັນງົດງາມຕາມທຳມະຊາດ ມີແປດຫລ່ຽມ ທີ່ເຈຍຣະໄນດີແລ້ວ ສຸກໃສ ເປັນປະກາຍໄດ້ສັດ ສ່ວນມີດ້າຍສີຂຽວ ສີເຫຼືອງ ສີແດງ ສີຂາວ ຫຼືສີນວົນຮ້ອຍຢູ່ຂ້າງໃນ" ໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ແມ່ນສັນໃດ ເຮົາກໍສັນນັ້ນຄືກັນ ໄດ້ບອກ ຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມຍ່ອມຮູ້ແຈ້ງແນວນີ້ວ່າ "ກາຍຂອງເຮົານີ້ຄຸມກັນເປັນຮູບຮ່າງ ປະກອບຂຶ້ນຈາກມະຫາພູຕະຮູບ ໔ ເກີດຈາກມານດາບິດາ ຈະເລີນວັຍຍ້ອນເຂົ້າສຸກແລະເຂົ້າໜົມກຸມມາດ ບໍ່ທ່ຽງແທ້ ຕ້ອງອົບ ຕ້ອງນວດເຟັ້ນ ມີອັນແຕກກະຈັດກະຈາຍໄປເປັນທຳມະດາ ວິນຍານຂອງເຮົາອາໄສແລະເນື່ອງຢູ່ໃນກາຍນີ້"

ຍ້ອນປະຕິບັດຕາມຂໍ້ປະຕິບັດທີ່ເຮົາບອກແລ້ວຮູ້ແຈ້ງແນວນີ້ນັ້ນແລ ສາວົກຂອງເຮົາເປັນຈຳນວນຫລາຍຈຶ່ງໄດ້ບັນລຸທີ່ສຸດແຫ່ງອະພິນຍາແລະອະພິນຍາປາຣະມີຢູ່

## ໘. ມະໂນມະຍິດທິຍານ

[໔໕໓] ອີກປະການໜຶ່ງ ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມເນຣະມິດກາຍອື່ນຈາກກາຍນີ້ ມີຮູບທີ່ເກີດແຕ່ໃຈ ມີອະໄວຍະວະຄົບຖ້ວນ ມີອິນຊີບໍ່ບົກຜ່ອງ ປຽບຄືຄົນດຶງໄສ້ອອກຈາກຫຍ້າປ້ອງ ເຂົາເຫັນແນວນີ້ວ່າ "ນີ້ຄືຫຍ້າປ້ອງ ນີ້ຄືໄສ້ ຫຍ້າປ້ອງເປັນແນວໜຶ່ງ ໄສ້ກໍເປັນອີກແນວໜຶ່ງ ແຕ່ໄສ້ຖືກດຶງອອກມາຈາກຫຍ້າປ້ອງນັ້ນເອງ" ຄົນດຶງດາບອອກຈາກຝັກ ເຂົາເຫັນແນວນີ້ວ່າ "ນີ້ຄືດາບ ນີ້ຄືຝັກ ດາບເປັນ ແນວໜຶ່ງ ຝັກກໍເປັນອີກແນວໜຶ່ງ ແຕ່ດາບຖືກດຶງອອກມາຈາກຝັກນັ້ນເອງ"

ຫຼື ຄົນດຶງງູອອກຈາກຄາບ ເຂົາເຫັນແນວນີ້ວ່າ "ນີ້ຄືງູ ນີ້ຄືຄາບ ງູເປັນແນວໜຶ່ງ ຄາບກໍເປັນອີກແນວໜຶ່ງ ແຕ່ງູຖືກດຶງອອກຈາກຄາບນັ້ນເອງ" ແມ່ນສັນໃດ ເຮົາກໍສັນນັ້ນ ຄືກັນ ໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມ ຂໍ້ປະຕິບັດທີ່ເຮົາບອກແລ້ວຍ່ອມເນຣະມິດກາຍອື່ນຈາກກາຍນີ້ໄດ້ ມີຮູບທີ່ເກີດແຕ່ໃຈ ມີອະໄວຍະວະຄົບຖ້ວນ ມີອິນຊີບໍ່ບົກຜ່ອງ

ຍ້ອນປະຕິບັດຕາມຂໍ້ປະຕິບັດທີ່ເຮົາບອກແລ້ວເນຣະມິດກາຍນັ້ນແລ ສາວົກທັງຫລາຍຂອງເຮົາເປັນຈຳນວນຫລາຍຈຶ່ງບັນລຸທີ່ສຸດແຫ່ງອະພິນຍາ ແລະອະພິນຍາປາຣະມີຢູ່

## ໙. ອິດທິວິທະຍານ

[໔໕໔] ອີກປະການໜຶ່ງ ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມ ສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ຜາກົດ ຫຼື ໃຫ້ຫາຍໄປກໍໄດ້ ຊອດຝາກຳແພງ (ແລະ)

ພູໄປໄດ້ບໍ່ຕິດຂັດ ຄືໄປໃນບ່ອນວ່າງກໍໄດ້ ຜຸດຂຶ້ນຫຼືດໍາລົງໃນແຜ່ນດິນຄືໄປໃນນໍ້າກໍໄດ້ ຍ່າງເທິງນໍ້າໂດຍທີ່ນໍ້າບໍ່ແຍກຄືຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດຄືນົກບິນໄປກໍໄດ້ ໃຊ້ຝາມືລູບຄໍາດວງຈັນດວງອາທິດອັນມີລິດຫຼາຍມີອານຸພາບຫຼາຍກໍໄດ້ ໃຊ້ອໍານາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ປຽບຄື ຊ່າງໝໍ້ຫຼືລູກມືຊ່າງໝໍ້ຜູ້ຊ່ຽວຊານ ເມື່ອນວົດດິນໜຽວດີແລ້ວ ເພິ່ງເຮັດພາຊະນະທີ່ຕ້ອງການ ໃຫ້ສໍາເລັດໄດ້

ຊ່າງງາຫຼືລູກມືຊ່າງງາຜູ້ຊ່ຽວຊານ ເມື່ອແຕ່ງງາດີແລ້ວ ເພິ່ງເຮັດເຄື່ອງງາຊະນິດທີ່ ຕ້ອງການໃຫ້ສໍາເລັດໄດ້

ຊ່າງຄໍາຫຼືລູກມືຊ່າງຄໍາຜູ້ຊ່ຽວຊານ ເມື່ອຫລອມຄໍາດີແລ້ວ ເພິ່ງເຮັດຄໍາ ຮູບປະພັນຊະນິດທີ່ຕ້ອງການໃຫ້ສໍາເລັດໄດ້ ແມ່ນສັນໃດ ເຮົາກໍສັນນັ້ນຄືກັນ ໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມຂໍ້ປະຕິບັດທີ່ເຮົາບອກແລ້ວ ຍ່ອມສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ປາກົດຫຼືໃຫ້ຫາຍໄປກໍໄດ້ ຊອດຝາ ກໍາແພງ (ແລະ) ພູໄປໄດ້ບໍ່ຕິດຂັດ ຄືໄປໃນບ່ອນວ່າງກໍໄດ້ ຜຸດຂຶ້ນຫຼືດໍາລົງໃນແຜ່ນດິນຄືໄປໃນນໍ້າກໍໄດ້ ຍ່າງເທິງນໍ້າໂດຍທີ່ນໍ້າບໍ່ແຍກຄືຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດຄືນົກບິນໄປກໍໄດ້ ໃຊ້ຝາມືລູບຄໍາດວງຈັນດວງອາທິດອັນມີລິດຫຼາຍມີອານຸພາບຫຼາຍກໍໄດ້ ໃຊ້ອໍານາດທາງກາຍໄປຈົນເຖິງພົມມະໂລກກໍໄດ້

ຍ້ອນປະຕິບັດຕາມຂໍ້ປະຕິບັດທີ່ເຮົາບອກແລ້ວ ສະແດງລິດນັ້ນແລ ສາວົກຂອງເຮົາເປັນຈໍານວນຫລາຍຈຶ່ງບັນລຸທີ່ສຸດແຫ່ງອະພິນຍາ ແລະອະພິນຍາປາຣະມີຢູ່

## ໔. ທິບພະໂສຕະທາດຍານ

[໔໕໔] ອີກປະການໜຶ່ງ ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມໄດ້ຍິນສຽງ ໒ ຊະນິດ ຄື (໑) ສຽງທິບ (໒) ສຽງມະນຸດ ທັງທີ່ ຢູ່ໄກແລະໃກ້ດ້ວຍຫູທິບອັນບໍລິສຸດເໜືອມະນຸດ ຄົນເປົ່າສັງທີ່ແຂງແຮງ ຈະເພິ່ງຍັງຄົນໃຫ້ຮູ້ຕະຫຼອດທິດທັງ ໔ ໂດຍບໍ່ຍາກ ແມ່ນສັນໃດ ເຮົາກໍສັນນັ້ນຄືກັນ ໄດ້ບອກຂໍ້ປະຕິບັດ ແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມຂໍ້ປະຕິບັດທີ່ເຮົາບອກແລ້ວຍ່ອມໄດ້ຍິນສຽງ ໒ ຊະນິດ ຄື (໑) ສຽງທິບ (໒) ສຽງມະນຸດ ທັງທີ່ຢູ່ໄກແລະໃກ້ ດ້ວຍຫູທິບອັນບໍລິສຸດເໜືອມະນຸດ

ຍ້ອນປະຕິບັດຕາມຂໍ້ປະຕິບັດທີ່ເຮົາບອກແລ້ວໄດ້ຍິນສຽງ ໒ ຊະນິດນັ້ນແລ ສາວົກທັງຫລາຍຂອງເຮົາເປັນຈໍານວນຫລາຍ ຈຶ່ງໄດ້ບັນລຸທີ່ສຸດແຫ່ງອະພິນຍາ ແລະ ອະພິນຍາປາຣະມີຢູ່

## ໕. ເຈໂຕປະຣິຍະຍານ

[໔໕໖] ອີກປະການໜຶ່ງ ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍ

ຂອງເຮົາຜູ້ປະຕິບັດຕາມ ກໍານົດຮູ້ຈິດຂອງສັດ ແລະ ຄົນອື່ນດ້ວຍຈິດຂອງຕົນ ຄື

ຈິດມີຣາຄະກໍຮູ້ວ່າ "ຈິດມີຣາຄະ" ຫຼື ຈິດປາສະຈາກຣາຄະກໍຮູ້ວ່າ "ຈິດປາສະຈາກຣາຄະ" ຈິດມີໂທສະກໍຮູ້ວ່າ "ຈິດມີໂທສະ" ຫຼືຈິດປາສະຈາກໂທສະກໍຮູ້ວ່າ "ຈິດປາສະຈາກໂທສະ" ຈິດ ມີໂມຫະກໍຮູ້ວ່າ "ຈິດມີໂມຫະ" ຫຼືຈິດປາສະຈາກໂມຫະກໍຮູ້ວ່າ "ຈິດປາສະຈາກໂມຫະ" ຈິດຫົດຫູ່ກໍຮູ້ວ່າ "ຈິດຫົດຫູ່" ຫຼືຈິດຟຸ້ງຊ່ານກໍຮູ້ວ່າ "ຈິດຟຸ້ງຊ່ານ"ຈິດເປັນມະຫັກຄະຕະໆກໍຮູ້ວ່າ "ຈິດເປັນມະຫັກຄະຕະ" ຫຼືຈິດບໍ່ເປັນມະຫັກຄະຕະກໍຮູ້ວ່າ "ຈິດບໍ່ ເປັນມະຫັກຄະຕະ"ຈິດມີຈິດອື່ນຍິ່ງກວ່າກໍຮູ້ວ່າ "ຈິດມີຈິດອື່ນຍິ່ງກວ່າ" ຫຼືຈິດບໍ່ມີຈິດອື່ນຍິ່ງກວ່າກໍຮູ້ວ່າ "ຈິດບໍ່ມີຈິດອື່ນຍິ່ງກວ່າ" ຈິດເປັນສະມາທິກໍຮູ້ວ່າ "ຈິດເປັນສະມາທິ" ຫຼືຈິດບໍ່ເປັນສະມາທິກໍຮູ້ວ່າ "ຈິດບໍ່ເປັນສະມາທິ" ຈິດລຸດພົ້ນກໍຮູ້ວ່າ "ຈິດລຸດພົ້ນ" ຫຼືຈິດບໍ່ລຸດພົ້ນກໍຮູ້ວ່າ "ຈິດບໍ່ລຸດພົ້ນ"

ຊາຍໜຸ່ມຍິງສາວທີ່ມັກການແຕ່ງໂຕ ເມື່ອແຍງເບິ່ງເງົາໜ້າຂອງຕົນໃນແກ້ວໃສສະອາດ ຫຼືໃນພາຊະນະນໍ້າໃສ ໜ້າມີໄຝຝ້າກໍຮູ້ວ່າ ມີໄຝຝ້າ ບໍມີໄຝຝ້າກໍຮູ້ວ່າ ບໍ່ມີໄຝຝ້າ ແມ່ນສັນໃດ ເຮົາກໍສັນນັ້ນຄືກັນ ໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍ ຂອງເຮົາຜູ້ປະຕິບັດຕາມຂໍ້ປະຕິບັດທີ່ເຮົາບອກແລ້ວຍ່ອມກໍານົດຮູ້ຈິດຂອງສັດ ແລະຄົນອື່ນດ້ວຍ ຈິດຂອງຕົນ ຄື

ຈິດມີຣາຄະກໍຮູ້ວ່າ "ຈິດມີຣາຄະ" ຫຼືຈິດປາສະຈາກຣາຄະກໍຮູ້ວ່າ "ຈິດປາສະຈາກຣາຄະ" ຈິດມີໂທສະກໍຮູ້ວ່າ "ຈິດມີໂທສະ" ຫຼືຈິດປາສະຈາກໂທສະກໍຮູ້ວ່າ "ຈິດປາສະຈາກໂທສະ" ຈິດມີໂມຫະ ฯລฯ ຫຼືຈິດປາສະຈາກໂມຫະ ฯລฯ ຈິດຫົດຫູ່ ฯລฯ ຫຼື ຈິດຟຸ້ງຊ່ານ ฯລฯ ຈິດເປັນມະຫັກຄະຕະ ฯລฯ ຫຼືຈິດບໍ່ເປັນມະຫັກຄະຕະ ฯລฯ ຈິດມີຈິດອື່ນຍິ່ງກວ່າ ฯລฯ ຫຼືຈິດບໍ່ມີຈິດອື່ນຍິ່ງກວ່າ ฯລฯ ຈິດເປັນສະມາທິ ฯລฯ ຫຼືຈິດບໍ່ເປັນສະມາທິ ฯລฯ ຈິດລຸດພົ້ນກໍຮູ້ວ່າ "ຈິດລຸດພົ້ນ" ຫຼືຈິດບໍ່ລຸດພົ້ນກໍຮູ້ວ່າ "ຈິດບໍ່ລຸດພົ້ນ"

ຍ້ອນປະຕິບັດຕາມຂໍ້ປະຕິບັດທີ່ເຮົາບອກແລ້ວຮູ້ຈິດຜູ້ອື່ນນັ້ນແລ ສາວົກຂອງເຮົາເປັນຈໍານວນຫລາຍຈຶ່ງໄດ້ບັນລຸທີ່ສຸດແຫ່ງອະພິນຍາແລະອະພິນຍາປາຣະມີຢູ່

## ຜ. ປຸບເພນິວາສານຸດສະຕິຍານ

[໔໕໗] ອີກປະການໜຶ່ງ ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບເປັນຈໍານວນຫລາຍແດ່ ຕະຫຼອດວິວັດຕະກັບເປັນຈໍານວນຫລາຍແດ່ ຕະຫຼອດສັງວັດຕະກັບ ແລະວິວັດຕະກັບໆເປັນ

ຈຳນວນຫລາຍແດ່ວ່າ "ໃນພົບນັ້ນເຮົາມີຊື່ແບບນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແບບນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ ເຮົາກໍມີຊື່ແບບນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແບບນັ້ນ ໆ ຈຸຕິຈາກພົບນັ້ນຈຶ່ງມາເກີດໃນພົບນີ້" ທ່ານຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແບບນີ້ ຄືນຈາກເຮືອນຕົນໄປເຮືອນອື່ນ ແລ້ວຈາກເຮືອນນັ້ນໄປສູ່ເຮືອນອື່ນອີກ ເຂົາຈາກເຮືອນນັ້ນກັບມາຍັງເຮືອນເດີມຂອງຕົນຣະນຶກໄດ້ແບບນີ້ວ່າ "ເຮົາໄດ້ຈາກເຮືອນຕົນໄປເຮືອນອື່ນ ໃນເຮືອນນັ້ນ ເຮົາໄດ້ຢືນ ນັ່ງ ເວົ້າ ນິ່ງເສີຍແບບນັ້ນ ໆ ເຮົາໄດ້ຈາກແມ່ນເຮືອນນັ້ນໄປສູ່ເຮືອນນັ້ນ ແມ່ນໃນເຮືອນນັ້ນ ເຮົາກໍໄດ້ຢືນ ນັ່ງ ເວົ້າ ນິ່ງເສີຍ ແບບນັ້ນ ໆ ແລ້ວກັບຈາກເຮືອນນັ້ນມາຍັງເຮືອນເດີມຂອງຕົນ" ແມ່ນສັນໃດ ເຮົາກໍສັນນັ້ນ ຄືກັນ ໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມ ຂໍ້ປະຕິບັດທີ່ເຮົາບອກແລ້ວຍ່ອມຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໔ ຊາດ ແດ່ ໗໑໗ ທ່ານຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມລັກສະນະທົ່ວໄປແລະຊີວະປະຫວັດ ແບບນີ້

ຍ້ອນປະຕິບັດຕາມຂໍ້ປະຕິບັດທີ່ເຮົາບອກແລ້ວຣະນຶກຊາດໄດ້ນັ້ນແລ ສາວົກຂອງເຮົາເປັນຈຳນວນຫລາຍຈຶ່ງໄດ້ບັນລຸທີ່ສຸດແຫ່ງອະພິນຍາແລະອະພິນຍາປາຣະມີຢູ່

## ກ. ທິບພະຈັກຂຸຍານ

[໔໕໘] ອີກປະການໜຶ່ງ ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ພວກເຂົາຫລັງຈາກຕາຍແລ້ວຈະໄປບັງເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ແຕ່ໝູ່ສັດທີ່ປະກອບກາຍສຸດຈະຣິດ ວະຈີສຸຈະຣິດ ແລະມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກແລະ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກ ພວກເຂົາຫລັງຈາກຕາຍແລ້ວຈະໄປບັງເກີດໃນສຸຄະຕິໂລກສະຫວັນ" ທ່ານເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະ ບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແບບນີ້ແລ ເຮືອນ ໔ ຫລັງທີ່ໃຊ້ປະຕູຮ່ວມກັນ ຄົນຕາດີຢືນຢູ່ລະຫວ່າງ ເຮືອນ ໔ ຫລັງນັ້ນ ເຫັນໝູ່ຊົນກຳລັງເຂົ້າໄປສູ່ເຮືອນແດ່ ອອກຈາກເຮືອນແດ່ ຍ່າງຮອບ ໆ ແດ່ ແມ່ນສັນໃດ ເຮົາກໍສັນນັ້ນຄືກັນ ໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້

ປະຕິບັດຕາມຂໍ້ປະຕິບັດທີ່ເຮົາບອກແລ້ວຍ່ອມເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອ ມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳ ຯລຯ

ຍ້ອນປະຕິບັດຕາມຂໍ້ປະຕິບັດທີ່ເຮົາບອກແລ້ວເຫັນສັດກຳລັງຈຸຕິ ກຳລັງເກີດນັ້ນແລ ສາວົກ ທັງຫລາຍຂອງເຮົາເປັນຈຳນວນຫລາຍຈຶ່ງໄດ້ບັນລຸທີ່ສຸດແຫ່ງອະພິນຍາແລະອະພິນຍາປາຣະມີຢູ່

## ໗. ອາສະວັກຂະຍະຍານ

[໔໕໗] ອີກປະການໜຶ່ງ ເຮົາໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກ ທັງຫລາຍຂອງເຮົາຜູ້ປະຕິບັດຕາມ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ສະນ້ຳໃສສະອາດບໍ່ຂຸ່ນມົວເທິງຍອດພູ ຄົນມີຕາດີຢືນທີ່ຂອບສະນັ້ນ ເຫັນຫອຍໂຂ່ງແລະຫອຍກາບ ກ້ອນຫີນ ແລະກ້ອນຫີນ ຫຼືຝູງປາ ກຳລັງແຫວກລອຍຢູ່ແດ່ ຢຸດຢູ່ແດ່ ໃນສະນັ້ນ ກໍຄິດ ແນວນີ້ວ່າ “ສະນ້ຳນີ້ ໃສສະອາດ ບໍ່ຂຸ່ນມົວ ຫອຍໂຂ່ງແລະຫອຍກາບ ກ້ອນຫີນແລະກ້ອນຫີນ ຫຼືຝູງປາ ເຫລົ່ານີ້ກຳລັງແຫວກລອຍຢູ່ກໍມີ ຢຸດຢູ່ກໍມີ ໃນສະນັ້ນ” ແມ່ນສັນໃດ໔ ເຮົາກໍສັນນັ້ນຄືກັນ ໄດ້ບອກຂໍ້ປະຕິບັດແກ່ສາວົກທັງຫລາຍ ສາວົກທັງຫລາຍຂອງເຮົາຜູ້ປະຕິບັດຕາມຂໍ້ປະຕິບັດທີ່ເຮົາບອກແລ້ວຍ່ອມເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ຍ້ອນປະຕິບັດຕາມຂໍ້ປະຕິບັດທີ່ເຮົາບອກແລ້ວຮູ້ແຈ້ງວິມຸດຕິນັ້ນແລ ສາວົກຂອງເຮົາເປັນຈຳນວນຫລາຍຈຶ່ງໄດ້ບັນລຸທີ່ສຸດແຫ່ງອະພິນຍາແລະອະພິນຍາປາຣະມີຢູ່

ນີ້ແລ ເປັນທຳປະການທີ ໕ ເຊິ່ງເປັນເຫດໃຫ້ສາວົກທັງຫລາຍຂອງເຮົາສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສເຮົາຢູ່

ອຸທາຍີ ທຳ ໕ ປະການນີ້ແລ ເປັນເຫດໃຫ້ສາວົກທັງຫລາຍຂອງເຮົາສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ນອກຈາກສັກກາຣະ ເຄົາລົບແລ້ວກໍຍັງອາໄສເຮົາຢູ່”

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ສະກຸລຸທາຍີປະຣິພາຊົກມີໃຈຍິນດີຊົມຊື່ນພຣະພາສິດ ຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະຫາສະກຸລຸທາຍີສູດທີ ໗ ຈົບ**

# ໗. ສະມະນະມຸນຖິກະສູດ

## ວ່າດ້ວຍປະຣິພາຊົກຊື່ອຸກຄາທະມາໃນສະມະໜະມຸນຖິກາບຸດ

[໘໗໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະ-ເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນແລ ປະຣິພາຊົກຊື່ອຸກຄາທະມາໃນສະມະໜະມຸນຖິກາບຸດ ກັບປະຣິພາຊົກປະມານ ໕໐໐ ຄົນ ພ້ອມດ້ວຍປະຣິພາຊົກບໍລິສັດໝູ່ໃຫຍ່ ອາໄສຢູ່ໃນອາຣາມຂອງພຣະນາງມັນລິກາເທວີຊື່ເອກສາລາ ເຊິ່ງຮ້ອມລ້ອມດ້ວຍຕົ້ນໝາກພັບ ອັນເປັນທີ່ປະຊຸມສະແດງລັດທິ ຄັ້ງນັ້ນ ຊ່າງໄມ້ຊື່ປັນຈະກັງຄະ ອອກຈາກນະຄອນສາວັດຖີເພື່ອເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແຕ່ຍັງເວັນ ໄດ້ຄິດວ່າ

"ບັດນີ້ບໍ່ແມ່ນເວລາທີ່ຈະເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກເຈົ້າຊົງຫຼີບຫຼີກຢູ່ ບັດນີ້ ບໍ່ແມ່ນເວລາທີ່ຈະເຂົ້າໄປຫາພິກຂຸທັງຫລາຍຜູ້ພ່ຳເພັງພຽນທາງໃຈ ພິກຂຸທັງຫລາຍຜູ້ພ່ຳເພັງພຽນ ທາງໃຈຍັງຫຼີບຫຼີກຢູ່ ທາງທີ່ດີ ເຮົາຄວນເຂົ້າໄປຫາອຸກຄາທະມານະປະຣິພາຊົກສະມະໜະມຸນຖິກາບຸດ ທີ່ອາຣາມຂອງພຣະນາງມັນລິກາເທວີຊື່ເອກສາລາ ເຊິ່ງຮ້ອມລ້ອມດ້ວຍຕົ້ນໝາກພັບ ອັນເປັນທີ່ປະຊຸມສະແດງລັດທິ"

ລຳດັບນັ້ນ ຊ່າງໄມ້ຊື່ປັນຈະກັງຄະຈຶ່ງເຂົ້າໄປຫາອຸກຄາທະມານະປະຣິພາຊົກ ສະມະໜະມຸນຖິກາບຸດ ເຖິງອາຣາມຂອງພຣະນາງມັນລິກາເທວີຊື່ເອກສາລາ ເຊິ່ງຮ້ອມລ້ອມດ້ວຍຕົ້ນໝາກພັບ ອັນເປັນ ທີ່ປະຊຸມສະແດງລັດທິ

### ເດຍຣັດສານກະຖາ

ສະໄໝນັ້ນ ອຸກຄາທະມານະປະຣິພາຊົກ ສະມະໜະມຸນຖິກາບຸດກຳລັງນັ່ງສົນທະນາຢູ່ກັບ ປະຣິພາຊົກບໍລິສັດໝູ່ໃຫຍ່ຜູ້ກຳລັງສົນທະນາເຖິງເດຍຣັດສານກະຖາອຕ່າງ ໆ ດ້ວຍສຽງດັງອື້ອຶງ ຄື ເວົ້າເລື້ອງພຣະຣາຊາ ເລື້ອງໂຈນ ເລື້ອງມະຫາອຳມາດ ເລື້ອງກອງທັບ ເລື້ອງໄພເລື້ອງ ການຮົບ ເລື້ອງເຂົ້າ ເລື້ອງນ້ຳ ເລື້ອງຜ້າ ເລື້ອງທີ່ນອນ ເລື້ອງພວງດອກໄມ້ ເລື້ອງຂອງຫອມ ເລື້ອງຍາດ ເລື້ອງຍານ ເລື້ອງເຮືອນ ເລື້ອງນິຄົມ ເລື້ອງເມືອງຫລວງ ເລື້ອງຊົນນະບົດເລື້ອງສະຕີ (ເລື້ອງບຸຣຸດ) ເລື້ອງຄົນກ້າຫານ ເລື້ອງຮ່ອມ ເລື້ອງທ່ານ້ຳ ເລື້ອງຄົນທີ່ລ່ວງລັບໄປແລ້ວ ເລື້ອງຕ່າງ ໆ ເລື້ອງໂລກ ເລື້ອງທະເລ ເລື້ອງຄວາມຈະເລີນ ແລະຄວາມເສື່ອມ ແນວນັ້ນ ໆ

ອຸກຄາຫະມານະປະຣິພາຊົກ ສະມະໜະມຸນຖິກາບຸດ ໄດ້ເຫັນຊ່າງໄມ້ຊື່ປັນຈະກັງຄະກຳລັງຍ່າງມາແຕ່ໄກ ຈຶ່ງຫ້າມບໍລິສັດຂອງຕົນ ວ່າ

"ທ່ານຜູ້ຈະເລີນທັງຫລາຍ ໂຜດງຽບນອຍ ຢ່າສົ່ງສຽງອື້ອຶງ ນີ້ຄືຊ່າງໄມ້ຊື່ ປັນຈະກັງຄະຜູ້ເປັນສາວົກຂອງພຣະສະມະນະໂຄດົມກຳລັງຍ່າງມາ ທ່ານເປັນສາວົກຄົນໜຶ່ງບັນດາສາວົກຂອງພຣະສະມະນະໂຄດົມຜູ້ເປັນຄະຫຼືຫັດ ນຸ່ງຂາວຫົ່ມຂາວ ຜູ້ອາໄສຢູ່ທີ່ນະຄອນສາວັດຖີ ທ່ານເຫຼົ່ານັ້ນຊອບສຽງເບົາ ແນະນຳໃຫ້ເວົ້າກັນເບົາ ໆ ສັນເສີນຄຸນຂອງຄົນທີ່ເວົ້າສຽງເບົາ ບາງເທື່ອຊ່າງໄມ້ຊື່ປັນຈະກັງຄະຮູ້ວ່າບໍລິສັດສຽງເບົາ ທ່ານອາດຈະເຂົ້າມາຫາກໍໄດ້"

ລຳດັບນັ້ນ ປະຣິພາຊົກເຫຼົ່ານັ້ນຈຶ່ງໄດ້ພາກັນນິ່ງ

## ວາທະຂອງປະຣິພາຊົກ

[໔໖໑] ລຳດັບນັ້ນ ຊ່າງໄມ້ຊື່ປັນຈະກັງຄະໄດ້ເຂົ້າໄປຫາອຸກຄາຫະມານະປະຣິພາຊົກ ສະມະໜະມຸນຖິກາບຸດຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ອຸກຄາຫະມານະປະຣິພາຊົກ ສະມະໜະມຸນຖິກາບຸດໄດ້ກ່າວກັບຊ່າງໄມ້ຊື່ປັນຈະກັງຄະວ່າ

"ຊ່າງໄມ້ ເຮົາບັນຍັດບຸຣຸດບຸກຄົນຜູ້ປະກອບດ້ວຍທຳ ໔ ປະການວ່າ ເປັນຜູ້ມີ ກຸສົນພຽບພ້ອມ ມີກຸສົນປະເສີດ ເປັນສະມະນະຜູ້ບັນລຸທຳຊັ້ນສູງທີ່ຄວນບັນລຸ ບໍ່ມີໃຜສູ້ວາທະໄດ້

ທຳ ໔ ປະການ ອັນໃດແດ່
ຄື ບຸກຄົນໃນໂລກນີ້

໑. ບໍ່ເຮັດກຳຊົ່ວທາງກາຍ
໒. ບໍ່ກ່າວວາຈາຊົ່ວ
໓. ບໍ່ດຳຣິຄວາມດຳຣິຊົ່ວ
໔. ບໍ່ປະກອບອາຊີບຊົ່ວ

ຊ່າງໄມ້ ເຮົາບັນຍັດບຸຣຸດບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລວ່າ ເປັນຜູ້ມີກຸສົນພຽບພ້ອມ ມີກຸສົນປະເສີດ ເປັນສະມະນະຜູ້ບັນລຸທຳຊັ້ນສູງທີ່ຄວນບັນລຸ ບໍ່ມີໃຜສູ້ວາທະໄດ້"

ລຳດັບນັ້ນ ຊ່າງໄມ້ຊື່ປັນຈະກັງຄະ ບໍ່ຍິນດີ ບໍ່ຄັດຄ້ານພາສິດຂອງອຸກຄາຫະມານະປະຣິພາຊົກ ສະມະໜະມຸນຖິກາບຸດ ລຸກຈາກອາສະນະຈາກໄປດ້ວຍຄິດວ່າ "ເຮົາຈັກຮູ້ທົ່ວເຖິງ ເນື້ອຄວາມແຫ່ງພາສິດນີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ" ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນເລື້ອງທີ່ສົນທະນາປາໄສກັບອຸກຄາຫະມານະປະຣິພາຊົກ ສະມະໜະມຸນຖິກາບຸດໃຫ້ພຣະຜູ້ມີພຣະພາກເຈົ້າຟັງທັງໝົດ

[໔໖໔] ເມື່ອຊ່າງໄມ້ຊື່ປັນຈະກັງຄະຂາບທູນແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ ຕັດວ່າ "ຊ່າງໄມ້ ເມື່ອເປັນແນວນີ້ ເດັກອ່ອນທີ່ຍັງນອນຫງາຍຢູ່ ກໍຈັກເປັນຜູ້ມີກຸສົນພຽບພ້ອມ ມີກຸສົນປະເສີດ ເປັນສະມະນະຜູ້ບັນລຸທຳຊັ້ນສູງທີ່ຄວນບັນລຸ ບໍ່ມີໃຜສູ້ວາທະໄດ້

ແທ້ຈິງ ເດັກອ່ອນທີ່ຍັງນອນຫງາຍຢູ່ ແມ່ນແຕ່ກາຍກໍຍັງບໍ່ຮູ້ຈັກ໑ ຈັກເຮັດກຳຊົ່ວທາງກາຍໄດ້ບ່ອນໃດນໍ ນອກຈາກຈະມີພຽງອາການນອນດີ້ນຮົນ ເດັກອ່ອນທີ່ຍັງນອນຫງາຍຢູ່ ແມ່ນແຕ່ວາຈາກໍຍັງບໍ່ຮູ້ຈັກ໔ ຈັກກ່າວວາຈາຊົ່ວໄດ້ບ່ອນໃດນໍ ນອກຈາກຈະມີພຽງການ ຮ້ອງໄຫ້ ເດັກອ່ອນທີ່ຍັງນອນຫງາຍຢູ່ ແມ່ນແຕ່ຄວາມດຳຣິກໍຍັງບໍ່ຮູ້ຈັກ ຈັກດຳຣິຊົ່ວໄດ້ແຕ່ ບ່ອນໃດນໍ ນອກຈາກຈະມີການສົ່ງສຽງຮ້ອງ ເດັກອ່ອນທີ່ຍັງນອນຫງາຍຢູ່ ແມ່ນແຕ່ການ ລ້ຽງຊີບກໍຍັງບໍ່ຮູ້ຈັກລ້ຽງຊີບຊົ່ວໄດ້ບ່ອນໃດນໍ ນອກຈາກການດື່ມນ້ຳນົມຂອງມານດາ

ຊ່າງໄມ້ ເມື່ອເປັນແນວນີ້ ເດັກອ່ອນທີ່ຍັງນອນຫງາຍຢູ່ກໍຈັກເປັນຜູ້ມີກຳລັງພຽບພ້ອມ ມີກຸສົນປະເສີດ ເປັນສະມະນະຜູ້ບັນລຸທຳຊັ້ນສູງທີ່ຄວນບັນລຸ ບໍ່ມີໃຜສູ້ວາທະໄດ້

[໔໖໕] ຊ່າງໄມ້ ເຮົາບັນຍັດບຸຣຸດບຸກຄົນຜູ້ປະກອບດ້ວຍທຳ ໔ ປະການວ່າ ບໍ່ແມ່ນຜູ້ມີກຸສົນພຽບພ້ອມ ບໍ່ແມ່ນຜູ້ມີກຸສົນປະເສີດ ບໍ່ແມ່ນສະມະນະຜູ້ບັນລຸທຳຊັ້ນສູງທີ່ຄວນບັນລຸບໍ່ມີໃຜສູ້ວາທະໄດ້ ແຕ່ບຸຣຸດບຸກຄົນນີ້ຍັງດີກວ່າເດັກອ່ອນທີ່ນອນຫງາຍຢູ່ແດ່

ທຳ ໔ ປະການ ອັນໃດແດ່

ຄື ບຸຣຸດບຸກຄົນໃນໂລກນີ້

໑. ບໍ່ເຮັດກຳຊົ່ວທາງກາຍ
໔. ບໍ່ກ່າວວາຈາຊົ່ວ
໕. ບໍ່ດຳຣິຄວາມດຳຣິຊົ່ວ
໔. ບໍ່ປະກອບອາຊີບຊົ່ວ

ເຮົາບັນຍັດບຸຣຸດບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ແລວ່າ ບໍ່ແມ່ນຜູ້ມີກຸສົນພຽບພ້ອມ ບໍ່ແມ່ນຜູ້ມີກຸສົນປະເສີດ ບໍ່ແມ່ນສະມະນະຜູ້ບັນລຸທຳຊັ້ນສູງທີ່ຄວນບັນລຸ ບໍ່ມີໃຜສູ້ວາທະໄດ້ ແຕ່ບຸຣຸດບຸກຄົນນີ້ຍັງດີກວ່າເດັກອ່ອນທີ່ນອນຫງາຍຢູ່ແດ່

ຊ່າງໄມ້ ເຮົາບັນຍັດບຸຣຸດບຸກຄົນຜູ້ປະກອບດ້ວຍທຳ ໑໐ ປະການວ່າ ເປັນຜູ້ມີກຸສົນພຽບພ້ອມ ມີກຸສົນປະເສີດ ເປັນສະມະນະຜູ້ບັນລຸທຳຊັ້ນສູງທີ່ຄວນບັນລຸບໍ່ມີໃຜສູ້ວາທະໄດ້

**ເສຂະທຳ**

ເຮົາກ່າວວ່າ "ຂໍ້ທີ່ສິນເຫລົ່ານີ້ເປັນອະກຸສົນ ເປັນສິ່ງທີ່ບຸກຄົນຄວນຮູ້"

ເຮົາກ່າວວ່າ "ຂໍ້ທີ່ສີນເປັນອະກຸສົນ ມີສະມຸດຖານມາຈາກຈິດນີ້ ເປັນສິ່ງທີ່ບຸກຄົນຄວນຮູ້"

ເຮົາກ່າວວ່າ "ຂໍ້ທີ່ສີນເປັນອະກຸສົນດັບໄປໂດຍບໍ່ເຫຼືອໃນບ່ອນນີ້ ເປັນສິ່ງທີ່ບຸກຄົນຄວນຮູ້"

ເຮົາກ່າວວ່າ "ຂໍ້ທີ່ບຸກຄົນຜູ້ປະຕິບັດແນວນີ້ ຊື່ວ່າເປັນຜູ້ປະຕິບັດເພື່ອຄວາມດັບແຫ່ງສີນທີ່ເປັນອະກຸສົນ ເປັນສິ່ງທີ່ບຸກຄົນຄວນຮູ້"

ເຮົາກ່າວວ່າ "ຂໍ້ທີ່ສີນເຫລົ່ານີ້ເປັນກຸສົນ ເປັນສິ່ງທີ່ບຸກຄົນຄວນຮູ້"

ເຮົາກ່າວວ່າ "ຂໍ້ທີ່ສີນເປັນກຸສົນມີສະມຸດຖານມາແຕ່ຈິດນີ້ ເປັນສິ່ງທີ່ບຸກຄົນຄວນຮູ້"

ເຮົາກ່າວວ່າ "ຂໍ້ທີ່ສີນເປັນກຸສົນດັບໄປໂດຍບໍ່ເຫຼືອໃນບ່ອນນີ້ ເປັນສິ່ງທີ່ບຸກຄົນຄວນຮູ້"

ເຮົາກ່າວວ່າ "ຂໍ້ທີ່ບຸກຄົນຜູ້ປະຕິບັດແນວນີ້ ຊື່ວ່າເປັນຜູ້ປະຕິບັດເພື່ອຄວາມດັບແຫ່ງສີນທີ່ເປັນກຸສົນ ເປັນສິ່ງທີ່ບຸກຄົນຄວນຮູ້"

ເຮົາກ່າວວ່າ "ຂໍ້ທີ່ຄວາມດຳຣິເຫລົ່ານີ້ເປັນອະກຸສົນ ເປັນສິ່ງທີ່ບຸກຄົນຄວນຮູ້"

ເຮົາກ່າວວ່າ "ຂໍ້ທີ່ຄວາມດຳຣິທີ່ເປັນອະກຸສົນມີສະມຸດຖານມາແຕ່ຈິດນີ້ ເປັນສິ່ງທີ່ບຸກຄົນຄວນຮູ້"

ເຮົາກ່າວວ່າ "ຂໍ້ທີ່ຄວາມດຳຣິທີ່ເປັນອະກຸສົນດັບໄປໂດຍບໍ່ເຫຼືອໃນບ່ອນນີ້ ເປັນສິ່ງທີ່ບຸກຄົນຄວນຮູ້"

ເຮົາກ່າວວ່າ "ຂໍ້ທີ່ບຸກຄົນຜູ້ປະຕິບັດແນວນີ້ ຊື່ວ່າເປັນຜູ້ປະຕິບັດເພື່ອຄວາມດັບແຫ່ງຄວາມດຳຣິທີ່ເປັນອະກຸສົນ ເປັນສິ່ງທີ່ບຸກຄົນຄວນຮູ້"

ເຮົາກ່າວວ່າ "ຂໍ້ທີ່ຄວາມດຳຣິເຫລົ່ານີ້ເປັນກຸສົນ ເປັນສິ່ງທີ່ບຸກຄົນຄວນຮູ້"

ເຮົາກ່າວວ່າ "ຂໍ້ທີ່ຄວາມດຳຣິເປັນກຸສົນມີສະມຸດຖານມາແຕ່ຈິດນີ້ ເປັນສິ່ງທີ່ບຸກຄົນຄວນຮູ້"

ເຮົາກ່າວວ່າ "ຂໍ້ທີ່ຄວາມດຳຣິທີ່ເປັນກຸສົນດັບໄປໂດຍບໍ່ເຫຼືອໃນບ່ອນນີ້ ເປັນສິ່ງທີ່ບຸກຄົນຄວນຮູ້"

ເຮົາກ່າວວ່າ "ຂໍ້ທີ່ບຸກຄົນຜູ້ປະຕິບັດແນວນີ້ ຊື່ວ່າເປັນຜູ້ປະຕິບັດເພື່ອຄວາມດັບແຫ່ງຄວາມດຳຣິທີ່ເປັນກຸສົນ ເປັນສິ່ງທີ່ບຸກຄົນຄວນຮູ້"

## ເສຂະທຳວ່າດ້ວຍສີນ

[໔໙໔] ສີນທີ່ເປັນອະກຸສົນ ເປັນແນວໃດ?

ຄື ກາຍຍະກຳທີ່ເປັນອະກຸສົນ ວະຈີກຳທີ່ເປັນອະກຸສົນ ການລ້ຽງຊີບທີ່ເປັນບາບ ເຫລົ່ານີ້ ເຮົາຮຽກວ່າ “ສີນທີ່ເປັນອະກຸສົນ”

ສີນທີ່ເປັນອະກຸສົນເຫລົ່ານີ້ມີອັນໃດເປັນສະມຸດຖານ

ຄື ແມ່ນສະມຸດຖານແຫ່ງສີນທີ່ເປັນອະກຸສົນເຫຼົ່ານັ້ນ ເຮົາກໍໄດ້ກ່າວໄວ້ແລ້ວ ສະມຸດຖານແຫ່ງສີນນີ້ຄວນກ່າວວ່າ “ມີຈິດເປັນສະມຸດຖານ”

ຈິດດວງໃດນໍ?

ແທ້ຈິງຈິດມີຫຼາຍດວງ ມີຫຼາຍແນວ ມີຫຼາຍປະການ ຄື ຈິດທີ່ມີຣາຄະ ຈິດທີ່ມີໂທສະ ແລະຈິດທີ່ມີໂມຫະ໑ ສີນທີ່ເປັນອະກຸສົນມີຈິດເຫລົ່ານີ້ເປັນສະມຸດຖານ

ສີນທີ່ເປັນອະກຸສົນເຫລົ່ານີ້ດັບໄປໂດຍບໍ່ເຫຼືອໃນຢູ່ໃສ

ຄື ແມ່ນຄວາມດັບແຫ່ງສີນທີ່ເປັນອະກຸສົນເຫຼົ່ານັ້ນ ເຮົາກໍໄດ້ກ່າວໄວ້ແລ້ວ ພິກຂຸໃນທຳວິໄນນີ້ ລະກາຍທຸດຈະຣິດ ຈະເລີນກາຍສຸດຈະຣິດ ລະວະຈີທຸດຈະຣິດ ຈະເລີນວະຈີສຸຈະຣິດ ລະມະໂນທຸດຈະຣິດ ຈະເລີນມະໂນສຸດຈະຣິດ ລະມິດສາອາຊີວະ ລ້ຽງຊີບດ້ວຍສຳມາອາຊີວະ ສີນທີ່ເປັນອະກຸສົນເຫລົ່ານີ້ ດັບໄປໂດຍບໍ່ເຫຼືອໃນທຳເຫລົ່ານີ້໑

ຜູ້ປະຕິບັດແນວໃດ ຈຶ່ງຊື່ວ່າປະຕິບັດເພື່ອຄວາມດັບແຫ່ງສີນທີ່ເປັນອະກຸສົນ

ຄື ພິກຂຸໃນທຳວິໄນນີ້

໑. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ

໒. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ

໓. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອທຳກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ

໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍ ພິນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

ຊ່າງໄມ້ ບຸກຄົນຜູ້ປະຕິບັດແນວນີ້ແລ ຊື່ວ່າເປັນຜູ້ປະຕິບັດເພື່ອຄວາມດັບແຫ່ງສິນທີ່ເປັນອະກຸສົນ

[໔໙໕] ສິນທີ່ເປັນກຸສົນ ເປັນແນວໃດ?

ຄື ກາຍຍະກຳທີ່ເປັນກຸສົນ ວະຈີກຳທີ່ເປັນກຸສົນ ແລະແມ່ນອາຊີວະອັນບໍລິສຸດກໍ ລວມຢູ່ໃນສິນ ເຫລົ່ານີ້ເຮົາຮຽກວ່າ "ສິນທີ່ເປັນກຸສົນ"

ສິນທີ່ເປັນກຸສົນເຫລົ່ານີ້ມີອັນໃດເປັນສະມຸດຖານ

ຄື ແມ່ນສະມຸດຖານແຫ່ງສິນທີ່ເປັນກຸສົນເຫຼົ່ານັ້ນ ເຮົາກໍໄດ້ກ່າວໄວ້ແລ້ວ ສະມຸດຖານແຫ່ງສິນນີ້ຄວນກ່າວວ່າ "ມີຈິດເປັນສະມຸດຖານ"

ຈິດດວງໃດນໍ?

ແທ້ຈິງ ຈິດມີຫຼາຍດວງ ມີຫຼາຍແນວ ມີຫຼາຍປະການ ຄື ຈິດທີ່ປາສະຈາກຣາຄະ ທີ່ປາສະຈາກໂທສະ ແລະ ທີ່ປາສະຈາກໂມຫະ ສິນທີ່ເປັນກຸສົນມີຈິດເຫລົ່ານີ້ເປັນສະມຸດຖານ

ສິນທີ່ເປັນກຸສົນເຫລົ່ານີ້ດັບໄປໂດຍບໍ່ເຫຼືອໃນຢູ່ໄສ

ຄື ແມ່ນຄວາມດັບແຫ່ງສິນທີ່ເປັນກຸສົນເຫຼົ່ານັ້ນ ເຮົາກໍໄດ້ກ່າວໄວ້ແລ້ວ ພິກຂຸໃນທຳວິໄນນີ້ ເປັນຜູ້ມີສິນ ແຕ່ຫາແມ່ນມີພຽງສິນກໍພໍ ຍັງຈະຕ້ອງຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ຕາມຄວາມເປັນຈິງ ເຊິ່ງເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງສິນທີ່ເປັນກຸສົນເຫຼົ່ານັ້ນ

ບຸກຄົນຜູ້ປະຕິບັດແນວໃດ ຈຶ່ງຈະຊື່ວ່າປະຕິບັດເພື່ອຄວາມດັບແຫ່ງສິນທີ່ເປັນກຸສົນ

ຄື ພິກຂຸໃນທຳວິໄນນີ້

໑. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ

໒. ສ້າງສັນທະ ฯລฯ ເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ

໓. ສ້າງສັນທະ ໆລໆ ເພື່ອທຳກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ

໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍ ພົນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

ຊ່າງໄມ້ ບຸກຄົນຜູ້ປະຕິບັດແນວນີ້ແລ ຊື່ວ່າ ເປັນຜູ້ປະຕິບັດເພື່ອຄວາມດັບແຫ່ງສິນທີ່ເປັນກຸສົນ

## ເສຂະທຳວ່າດ້ວຍຄວາມດຳຣິ

[໘໕໕] ຄວາມດຳຣິທີ່ເປັນອະກຸສົນ ເປັນແນວໃດ?

ຄື ຄວາມດຳຣິໃນກາມ ຄວາມດຳຣິໃນພະຍາບາດ ຄວາມດຳຣິໃນການບຽດບຽນ ເຫລົ່ານີ້ເຮົາຮຽກວ່າ "ຄວາມດຳຣິທີ່ເປັນອະກຸສົນ"

ຄວາມດຳຣິທີ່ເປັນອະກຸສົນເຫລົ່ານີ້ ມີອັນໃດເປັນສະມຸດຖານ

ຄື ແມ່ນສະມຸດຖານແຫ່ງຄວາມດຳຣິທີ່ເປັນອະກຸສົນເຫຼົ່ານັ້ນ ເຮົາກໍໄດ້ກ່າວໄວ້ແລ້ວ ສະມຸດຖານແຫ່ງຄວາມດຳຣິນີ້ຄວນກ່າວວ່າ "ມີສັນຍາເປັນສະມຸດຖານ"

ສັນຍາປະເພດໃດນໍ?

ແທ້ຈິງ ແມ່ນສັນຍາກໍມີຫຼາຍ ມີຫຼາຍແນວ ມີຫຼາຍປະການ ຄື ສັນຍາໃນກາມ໑ ສັນຍາໃນພະຍາບາດ ສັນຍາໃນການບຽດບຽນ ຄວາມດຳຣິທີ່ເປັນອະກຸສົນມີສັນຍາເຫລົ່ານີ້ເປັນສະມຸດຖານ

ຄວາມດຳຣິທີ່ເປັນອະກຸສົນເຫລົ່ານີ້ ດັບໄປໂດຍບໍ່ເຫຼືອໃນຢູ່ໄສ

ຄື ແມ່ນຄວາມດັບແຫ່ງຄວາມດຳຣິທີ່ເປັນອະກຸສົນນັ້ນ ເຮົາກໍໄດ້ກ່າວໄວ້ແລ້ວ ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫລາຍແລ້ວ ບັນລຸປະຖົມຊານ ທີ່ມີວິຕົກວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ ເຊິ່ງເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງຄວາມດຳຣິທີ່ເປັນອະກຸສົນ

ບຸກຄົນຜູ້ປະຕິບັດແນວໃດ ຈຶ່ງຈະຊື່ວ່າ ປະຕິບັດເພື່ອຄວາມດັບແຫ່ງຄວາມດຳຣິທີ່ເປັນອະກຸສົນ

ຄື ພິກຂຸໃນທຳວິໄນນີ້

໑. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ

໒. ສ້າງສັນທະ ຯລຯ ເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ

໓. ສ້າງສັນທະ ຯລຯ ເພື່ອທຳກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ

໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍ ພິນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

ຊ່າງໄມ້ ບຸກຄົນຜູ້ປະຕິບັດແນວນີ້ແລ ຊື່ວ່າ ເປັນຜູ້ປະຕິບັດເພື່ອຄວາມດັບແຫ່ງຄວາມດຳຣິທີ່ເປັນອະກຸສົນ

[໔໙໗] ຄວາມດຳຣິທີ່ເປັນກຸສົນ ເປັນແນວໃດ?

ຄື ຄວາມດຳຣິໃນເນກຂຳມະ ຄວາມດຳຣິໃນຄວາມບໍ່ພະຍາບາດ ຄວາມດຳຣິໃນຄວາມບໍ່ບຽດບຽນ ເຫລົ່ານີ້ເຮົາຮຽກວ່າ “ຄວາມດຳຣິທີ່ເປັນກຸສົນ”

ຄວາມດຳຣິທີ່ເປັນກຸສົນນີ້ ມີອັນໃດເປັນສະມຸດຖານ

ຄື ແມ່ນສະມຸດຖານແຫ່ງຄວາມດຳຣິທີ່ເປັນກຸສົນເຫຼົ່ານັ້ນເຮົາກໍໄດ້ກ່າວໄວ້ແລ້ວ ສະມຸດຖານ ແຫ່ງຄວາມດຳຣິນີ້ຄວນກ່າວວ່າ “ມີສັນຍາເປັນສະມຸດຖານ”

ສັນຍາປະເພດໃດນໍ?

ແທ້ຈິງ ແມ່ນສັນຍາກໍມີຫຼາຍ ມີຫຼາຍແນວ ມີຫຼາຍປະການ ຄື ສັນຍາໃນ ເນກຂຳມະ ສັນຍາໃນຄວາມບໍ່ພະຍາບາດ ສັນຍາໃນຄວາມບໍ່ບຽດບຽນ ຄວາມດຳຣິທີ່ເປັນກຸສົນມີສັນຍາເຫລົ່ານີ້ເປັນສະມຸດຖານ

ຄວາມດຳຣິທີ່ເປັນກຸສົນເຫລົ່ານີ້ ດັບໄປໂດຍບໍ່ເຫຼືອໃນຢູ່ໄສ

ຄື ແມ່ນຄວາມດັບແຫ່ງຄວາມດຳຣິທີ່ເປັນກຸສົນນັ້ນ ເຮົາກໍໄດ້ກ່າວໄວ້ແລ້ວ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸໃນທຳວິໄນນີ້ບັນລຸທຸຕິຍະຊານ ຯລຯ ຢູ່ ເຊິ່ງເປັນທີ່ດັບໄປໂດຍ ບໍ່ເຫຼືອແຫ່ງຄວາມດຳຣິທີ່ເປັນກຸສົນເຫລົ່ານີ້

ບຸກຄົນຜູ້ປະຕິບັດແນວໃດ ຈຶ່ງຈະຊື່ວ່າ ປະຕິບັດເພື່ອຄວາມດັບແຫ່ງຄວາມດໍາຣິທີ່ເປັນກຸສົນ ຄື ພິກຂຸໃນທໍາວິໄນນີ້

໑. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອເຮັດບາບອະກຸສົນທໍາທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ

໒. ສ້າງສັນທະ ຯລຯ ເພື່ອລະບາບອະກຸສົນທໍາທີ່ເກີດຂຶ້ນແລ້ວ

໓. ສ້າງສັນທະ ຯລຯ ເພື່ອທໍາກຸສົນທໍາທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ

໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອຄວາມດໍາລົງຢູ່ ບໍ່ເລືອນຫາຍ ພິນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທໍາທີ່ເກີດຂຶ້ນແລ້ວ

ຊ່າງໄມ້ ບຸກຄົນຜູ້ປະຕິບັດແນວນີ້ແລ ຊື່ວ່າເປັນຜູ້ປະຕິບັດເພື່ອຄວາມດັບແຫ່ງຄວາມດໍາຣິທີ່ເປັນກຸສົນ

## ອະເສຂະທໍາ ໑໐ ປະການ

[໒໖໘] ຊ່າງໄມ້ ເຮົາບັນຍັດບຸກຄົນຜູ້ປະກອບດ້ວຍທໍາ ໑໐ ປະການ໑ໃດວ່າ ເປັນຜູ້ມີກຸສົນສົມບູນ ມີກຸສົນຢ່າງຍິ່ງ ເປັນສະມະນະຜູ້ບັນລຸທໍາຊັ້ນສູງທີ່ຄວນບັນລຸ ບໍ່ມີໃຜສູ້ວາທະໄດ້

ຄື ພິກຂຸໃນທໍາວິໄນນີ້

໑. ເປັນຜູ້ປະກອບດ້ວຍສໍາມາ ທິດຖິ ທີ່ເປັນອະເສຂະ
໒. ເປັນຜູ້ປະກອບດ້ວຍສໍາມາ ສັງກັບປະ ທີ່ເປັນອະເສຂະ
໓. ເປັນຜູ້ປະກອບດ້ວຍສໍາມາ ວາຈາ ທີ່ເປັນອະເສຂະ
໔. ເປັນຜູ້ປະກອບດ້ວຍສໍາມາ ກໍາມັນຕະ ທີ່ເປັນອະເສຂະ
໕. ເປັນຜູ້ປະກອບດ້ວຍສໍາມາ ອາຊີວະ ທີ່ເປັນອະເສຂະ
໖. ເປັນຜູ້ປະກອບດ້ວຍສໍາມາ ວາຍາມະ ທີ່ເປັນອະເສຂະ
໗. ເປັນຜູ້ປະກອບດ້ວຍສໍາມາ ສະຕິ ທີ່ເປັນອະເສຂະ
໘. ເປັນຜູ້ປະກອບດ້ວຍສໍາມາ ສະມາທິ ທີ່ເປັນອະເສຂະ
໙. ເປັນຜູ້ປະກອບດ້ວຍສໍາມາ ຍານະ ທີ່ເປັນອະເສຂະ
໑໐. ເປັນຜູ້ປະກອບດ້ວຍສໍາມາ ວິມຸດຕິ ທີ່ເປັນອະເສຂະ

ເຮົາບັນຍັດບຸກຄົນຜູ້ປະກອບດ້ວຍທໍາ ໑໐ ປະການນີ້ແລວ່າ ເປັນຜູ້ມີກຸສົນພຽບພ້ອມ ມີ

ກຸສົນປະເສີດ ເປັນສະມະນະຜູ້ບັນລຸທຳຊັ້ນສູງທີ່ຄວນບັນລຸ ບໍ່ມີໃຜສູ້ອາທະໄດ້"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ຊ່າງໄມ້ຊື່ປັນຈະກັງຄະມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ສະມະນະມຸນທິກະສູດທີ ໗ ຈົບ**

# ໘. ຈູລະສະກຸລຸທາຍີສູດ

## ວ່າດ້ວຍປະຣິພາຊົກຊື່ສະກຸລຸທາຍີ ສູດນ້ອຍ

[໔໙໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕເຂດນະຄອນຣາດຊະຄຶ ສະໄໝນັ້ນແລ ປະຣິພາຊົກຊື່ສະກຸລຸທາຍີພ້ອມດ້ວຍປະຣິພາຊົກບໍລິສັດໝູ່ໃຫຍ່ອາໄສຢູ່ໃນອາຣາມຂອງປະຣິພາຊົກອັນເປັນທີ່ໃຫ້ເຫຍື່ອແກ່ນົກຍູງ ເມື່ອເວລາເຊົ້າ ພຣະຜູ້ມີ ພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນສະເດັດເຂົ້າໄປບິນທະບາດໃນກຣຸງຣາດຊະຄຶ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ມີພຣະດຳຣິ ວ່າ

"ຍັງເຊົ້າເກີນໄປທີ່ຈະທ່ຽວບິນທະບາດໃນນະຄອນຣາດຊະຄຶ ທາງທີ່ດີ ເຮົາຄວນເຂົ້າໄປຫາສະກຸລຸທາຍີປະຣິພາຊົກ ຈົນເຖິງອາຣາມຂອງປະຣິພາຊົກອັນເປັນທີ່ໃຫ້ເຫຍື່ອແກ່ນົກຍູງ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ສະເດັດເຂົ້າໄປຈົນເຖິງອາຣາມຂອງປະຣິພາຊົກອັນເປັນທີ່ໃຫ້ເຫຍື່ອແກ່ນົກຍູງ

### ເດຍຣັດສານກະຖາ

ສະໄໝນັ້ນ ສະກຸລຸທາຍີປະຣິພາຊົກກຳລັງນັ່ງຢູ່ກັບປະຣິພາຊົກບໍລິສັດໝູ່ໃຫຍ່ຜູ້ກຳລັງສົນທະນາ ເຖິງເດຍຣັດສານກະຖາຕ່າງ ໆ ດ້ວຍສຽງດັງອື້ອຶງ ຄື ເວົ້າເລື້ອງພຣະຣາຊາ ເລື້ອງໂຈນ ຯລຯ ເລື້ອງຄວາມຈະເລີນແລະຄວາມເສື່ອມແນວນັ້ນ ໆ ສະກຸລຸທາຍີປະຣິພາຊົກ ໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ກຳລັງສະເດັດມາແຕ່ໄກ ຈຶ່ງຫ້າມບໍລິສັດຂອງຕົນວ່າ

"ທ່ານຜູ້ຈະເລີນທັງຫລາຍ ໂຜດງຽບນອຍ ຢ່າສົ່ງສຽງອື້ອຶງ ນີ້ຄື ພຣະສະມະນະໂຄດົມ

ກຳລັງສະເດັດມາ ພຣະອົງໂປຣດສຽງເບົາ ຊົງແນະນຳໃຫ້ເວົ້າກັນເບົາ ໆ ຕັດສັນເສີນຄຸນຂອງຄົນທີ່ເວົ້າສຽງເບົາ ບາງເທື່ອພຣະອົງຊົງຮູ້ວ່າບໍລິສັດສຽງເບົາ ພຣະອົງອາດຈະສະເດັດເຂົ້າມາຫາກໍໄດ້"

ລຳດັບນັ້ນ ປະຣິພາຊົກເຫຼົ່ານັ້ນຈຶ່ງໄດ້ພາກັນນິ່ງ

[໔໗໐] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ສະເດັດເຂົ້າໄປຫາສະກຸລຸທາຍີຮອດບ່ອນຢູ່ ສະກຸລຸທາຍີປະຣິພາຊົກທູນເຊື້ອເຊີນພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ພຣະອົງຜູ້ຈະເລີນ ຂໍເຊີນພຣະຜູ້ມີພຣະພາກເຈົ້າຈົ່ງສະເດັດເຂົ້າມາເທີ້ນ ຂໍຕ້ອນຮັບສະເດັດ ດົນ ໆ ພຣະອົງຈະມີເວລາສະເດັດມາທີ່ນີ້ ຂໍເຊີນພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທີ້ນ ອາສະນະນີ້ ປູລາດໄວ້ແລ້ວ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຈຶ່ງປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ແມ່ນສະກຸລຸທາຍີປະຣິພາຊົກ ກໍເລືອກນັ່ງຢູ່ບ່ອນທີ່ສົມຄວນທີ່ໃດທີ່ໜຶ່ງເຊິ່ງຕ່ຳກວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມສະກຸລຸທາຍີ ປະຣິພາຊົກວ່າ

"ອຸທາຍີ ບັດນີ້ ທ່ານທັງຫລາຍນັ່ງປະຊຸມສົນທະນາກັນດ້ວຍເລື້ອງອັນໃດ ແລະເລື້ອງອັນໃດທີ່ທ່ານທັງຫລາຍສົນທະນາກັນຄ້າງໄວ້"

ສະກຸລຸທາຍີປະຣິພາຊົກທູນຕອບວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເລື້ອງທີ່ຂ້າພຣະອົງທັງຫລາຍນັ່ງປະຊຸມສົນທະນາກັນໃນເວລານີ້ ຂອງດໄວ້ກ່ອນເທີ້ນ ເລື້ອງນີ້ພຣະຜູ້ມີພຣະພາກເຈົ້າ ຈະຊົງສະດັບໄດ້ໃນພາຍຫລັງໂດຍບໍ່ຍາກ ຂ້າແດ່ ພຣະອົງຜູ້ຈະເລີນ ໃນເວລາທີ່ຂ້າພຣະອົງ ບໍ່ໄດ້ເຂົ້າໄປສູ່ບໍລິສັດນີ້ ບໍລິສັດນີ້ກໍຈະນັ່ງສົນທະນາກັນແຕ່ເດຍຣັດສານກະຖາຕ່າງ ໆ ແຕ່ໃນເວລາ ທີ່ຂ້າພຣະອົງເຂົ້າໄປສູ່ບໍລິສັດນີ້ ບໍລິສັດນີ້ກໍນັ່ງແນມເບິ່ງແຕ່ໜ້າຂອງຂ້າພຣະອົງດ້ວຍຄວາມປະສົງວ່າ "ສະມະນະອຸທາຍີ ຈັກກ່າວທຳໃດແກ່ພວກເຮົາ ພວກເຮົາຈັກຟັງທຳນັ້ນ" ແລະໃນເວລາທີ່ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າມາຍັງບໍລິສັດນີ້ ທັງຂ້າພຣະອົງແລະບໍລິສັດນີ້ກໍນັ່ງແນມເບິ່ງພຣະພັກຂອງພຣະຜູ້ມີພຣະພາກເຈົ້າດ້ວຍຄວາມປະສົງວ່າ "ພຣະຜູ້ມີພຣະພາກເຈົ້າຈັກຕັດທຳໃດແກ່ພວກເຮົາ ພວກເຮົາຈັກຟັງທຳນັ້ນ"

## ຂັນສ່ວນອະດີດແລະຂັນສ່ວນອະນາຄົດ

[໔໗໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸທາຍີ ຖ້າເຊັ່ນນັ້ນ ທ່ານຈົ່ງຕັ້ງບັນຫາເຊິ່ງຈະເປັນເຫດໃຫ້ເຮົາສະແດງທຳໃນບໍລິສັດນີ້ເທີ້ນ"

ສະກຸລຸທາຍີປະຣິພາຊົກຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ມື້ກ່ອນ ໆ ທ່ານຜູ້ເປັນສັບພັນຍູ ມີປົກກະຕິເຫັນທຳທັງປວງ ປະຕິຍານຍານທັດສະນະແນວຄົບຖ້ວນວ່າ "ເມື່ອເຮົາຍ່າງຢູ່ ຢຸດຢູ່ ຫລັບຢູ່ ແລະ ຕື່ນຢູ່ ຍານທັດສະນະຈະຜາກົດຕໍ່ເນື່ອງຕະຫຼອດໄປ" ທ່ານຜູ້ນັ້ນຖືກຂ້າພຣະອົງຖາມບັນຫາຜາຣົບຂັນສ່ວນອະດີດກໍນຳເລື້ອງອື່ນມາເວົ້າປົກປິດ ໄຖລໄປເວົ້ານອກເລື້ອງທັງທຳຄວາມໂກດ ຄວາມປະທຸດສະຮ້າຍ ແລະ ຄວາມບໍ່ພໍໃຈໃຫ້ຜາກົດ ຂ້າພຣະອົງນັ້ນຣະນຶກເຖິງພຣະຜູ້ມີພຣະພາກເຈົ້າວ່າ "ຜູ້ສະຫຼາດໃນທຳເຫລົ່ານີ້ຕ້ອງເປັນພຣະຜູ້ມີພຣະພາກເຈົ້າແນ່ນອນ ຕ້ອງເປັນພຣະສຸຄົດແນ່ນອນ"

"ທ່ານຜູ້ເປັນສັບພັນຍູ ມີປົກກະຕິເຫັນທຳທັງປວງ ປະຕິຍານຍານທັດສະນະແນວ ຄົບຖ້ວນວ່າ "ເມື່ອເຮົາຍ່າງຢູ່ ຢຸດຢູ່ ຫລັບຢູ່ ແລະ ຕື່ນຢູ່ ຍານທັດສະນະຈະຜາກົດ ຕໍ່ເນື່ອງຕະຫຼອດໄປ" ທີ່ຖືກທ່ານຖາມບັນຫາຜາຣົບຂັນສ່ວນອະດີດກໍນຳເລື້ອງອື່ນມາເວົ້າ ປົກປິດ ໄຖລໄປເວົ້ານອກເລື້ອງ ທັງທຳຄວາມໂກດ ຄວາມປະທຸດສະຮ້າຍ ແລະ ຄວາມບໍ່ພໍໃຈໃຫ້ຜາກົດ ເປັນໃຜນໍ?"

"ນີຄັນ ນາຕະບຸດ ຂ້ານ້ອຍ"

"ຜູ້ໃດຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໔ ຊາດແດ່ ໗ລ໗ ຣະນຶກ ຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້ ຜູ້ນັ້ນຄວນຖາມບັນຫາຜາຣົບຂັນສ່ວນອະດີດກັບເຮົາ ຫຼືເຮົາຄວນຖາມບັນຫາຜາຣົບຂັນສ່ວນອະດີດກັບຜູ້ນັ້ນ ຜູ້ນັ້ນຈະເຮັດໃຫ້ເຮົາຍິນດີດ້ວຍການຕອບບັນຫາຜາຣົບຂັນສ່ວນອະດີດ ຫຼື ເຮົາຈະເພິ່ງເຮັດຈິດຂອງຜູ້ນັ້ນໃຫ້ຍິນດີດ້ວຍການຕອບບັນຫາຜາຣົບຂັນສ່ວນອະດີດ

ຜູ້ໃດເພິ່ງເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີ້ນ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳຜູ້ນັ້ນຄວນຖາມບັນຫາຜາຣົບຂັນສ່ວນອະນາຄົດກັບເຮົາ ຫຼື ເຮົາຄວນຖາມບັນຫາຜາຣົບຂັນສ່ວນອະນາຄົດກັບຜູ້ນັ້ນ ຜູ້ນັ້ນເຮັດໃຫ້ເຮົາຍິນດີດ້ວຍການຕອບບັນຫາຜາຣົບຂັນສ່ວນອະນາຄົດ ຫຼືເຮົາເພິ່ງຍັງຈິດຂອງຜູ້ນັ້ນໃຫ້ຍິນດີດ້ວຍການຕອບບັນຫາຜາຣົບຂັນສ່ວນອະນາຄົດ

ອຸທາຍີ ຈົ່ງງົດຂັນສ່ວນອະດີດແລະຂັນສ່ວນອະນາຄົດໄວ້ກ່ອນ ເຮົາຈັກສະແດງທຳແກ່ທ່ານວ່າ "ເມື່ອເຫດນີ້ມີ ຜົນນີ້ຈຶ່ງມີ ຍ້ອນເຫດນີ້ເກີດ ຜົນນີ້ຈຶ່ງເກີດ ເມື່ອເຫດນີ້ບໍ່ມີ ຜົນນີ້ ຈຶ່ງບໍ່ມີຍ້ອນເຫດນີ້ດັບ ຜົນນີ້ຈຶ່ງດັບ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຊາດນີ້ທີ່ຜາກົດແກ່ຂ້າພຣະອົງໂດຍອັດພາບນີ້ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດ ຂ້າພຣະອົງຍັງບໍ່ສາມາດຈະຣະນຶກໄດ້ເລີຍ ເປັນຫຍັງເລີຍ

ຈັກຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ๓ ຊາດແດ່ ຯລຯ ຣະນຶກເຖິງຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດແບບນີ້ ຄືພຣະຜູ້ມີພຣະພາກເຈົ້ານໍ ບັດນີ້ ແມ່ນແຕ່ປີສາດຫລິ້ນຝຸ່ນ ຂ້າພຣະອົງກໍຍັງບໍ່ເຄີຍເຫັນເລີຍ ເປັນຫຍັງແລ້ວຈັກເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຈັກຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳ ຄືພຣະຜູ້ມີພຣະພາກເຈົ້ານໍ ຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດກັບຂ້າພຣະອົງແບບນີ້ວ່າ "ອຸທາຍີ ຈົ່ງງົດຂັນສ່ວນອະດີດແລະຂັນສ່ວນອະນາຄົດໄວ້ກ່ອນ ເຮົາຈັກສະແດງທຳແກ່ທ່ານວ່າ "ເມື່ອເຫດນີ້ມີ ຜົນນີ້ຈຶ່ງມີ ຍ້ອນເຫດນີ້ເກີດ ຜົນນີ້ຈຶ່ງເກີດ ເມື່ອເຫດນີ້ບໍ່ມີ ຜົນນີ້ຈຶ່ງບໍ່ມີ ຍ້ອນເຫດນີ້ດັບ ຜົນນີ້ຈຶ່ງດັບ" ຈະຜາກົດແກ່ຂ້າພຣະອົງ ໂດຍປະມານຍິ່ງ ໆ ຂຶ້ນໄປ ກໍບໍ່ແມ່ນ ເປັນຫຍັງ ຂ້າພຣະອົງຈຶ່ງຈະເຮັດໃຫ້ພຣະຜູ້ມີພຣະພາກເຈົ້າ ຊົງຍິນດີດ້ວຍການຕອບບັນຫາໃນລັດທິອາຈານຂອງຕົນໄດ້ນໍ?"

## ເລື້ອງວັນນະ

[໒໗໒] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອຸທາຍີ ໃນລັດທິອາຈານຂອງຕົນ ທ່ານມີຄວາມເຫັນວ່າແນວໃດ?"

ສະກຸລຸທາຍີປະຣິພາຊົກທູນຕອບວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໃນລັດທິອາຈານຂອງຕົນ ຂ້າພຣະອົງມີຄວາມເຫັນແບບນີ້ວ່າ "ນີ້ເປັນວັນນະສູງສຸດ ນີ້ເປັນວັນນະສູງສຸດ"

"ໃນລັດທິອາຈານຂອງຕົນ ທ່ານມີຄວາມເຫັນແບບນີ້ວ່າ "ນີ້ເປັນວັນນະສູງສຸດ ນີ້ເປັນວັນນະສູງສຸດ" ວັນນະສູງສຸດນັ້ນເປັນແນວໃດ?"

"ວັນນະໃດບໍ່ມີວັນນະອື່ນຍິ່ງກວ່າ ຫຼື ປະນີດກວ່າ ວັນນະນັ້ນເປັນວັນນະສູງສຸດ ຂ້ານ້ອຍ"

"ວັນນະໃດບໍ່ມີວັນນະອື່ນຍິ່ງກວ່າຫຼືປະນີດກວ່າ ວັນນະນັ້ນເປັນວັນນະໃດນໍ?"

"ວັນນະໃດບໍ່ມີວັນນະອື່ນຍິ່ງກວ່າ ຫຼື ປະນີດກວ່າ ວັນນະນັ້ນເປັນວັນນະສູງສຸດ ຂ້ານ້ອຍ"

"ທ່ານກ່າວແຕ່ພຽງວ່າ "ວັນນະໃດບໍ່ມີວັນນະອື່ນຍິ່ງກວ່າ ຫຼື ປະນີດກວ່າວັນນະນັ້ນເປັນວັນນະສູງສຸດ" ຄຳທີ່ທ່ານກ່າວນັ້ນ ເພິ່ງຂະຫຍາຍຄວາມໄດ້ຢ່າງຍືດຍາວ ແຕ່ທ່ານ ບໍ່ຊີ້ວັນນະນັ້ນໃຫ້ຊັດ ປຽບຄືຊາຍຄົນໜຶ່ງຜາຣົບເຖິງຍິງສາວແບບນີ້ວ່າ "ເຮົາປາຖະໜາຮັກແພງຍິງງາມແຫ່ງຊົນນະບົດນີ້" ຄົນຈະຖາມເຂົາວ່າ "ພໍ່ທ່ານ ທ່ານຮູ້ຈັກຍິງຄົນນັ້ນຫຼືວ່າເປັນນາງກະສັດ ນາງພຣາມມະນີ ນາງແພດ ຫຼື ນາງສູດ" ເມື່ອຖືກຖາມ ແບບນີ້ ເຂົາຈະຕອບວ່າ "ບໍ່ຮູ້ຈັກ" ຈະຖືກ

ຖາມຕໍ່ໄປວ່າ "ທ່ານຮູ້ຈັກຍິງຄົນນັ້ນ ຫຼືວ່າ ມີຊື່ ຕະກູນ ສູງ ຕ່ຳ ສັນທັດ ດຳ ແຫຼ້ ຫຼື ຜິວເຫຼືອງ ຢູ່ໃນໝູ່ບ້ານ ນິຄົມ ຫຼື ເມືອງນັ້ນ" ເມື່ອຖືກຖາມແນວນີ້ ເຂົາຈະຕອບວ່າ "ຍັງບໍ່ຮູ້ຈັກ" ຈະຖືກຖາມຕໍ່ໄປວ່າ "ທ່ານປາຖະໜາຮັກແພງຍິງທີ່ຍັງບໍ່ເຄີຍຮູ້ຈັກທັງບໍ່ເຄີຍເຫັນ ແນວນັ້ນບໍ" ເມື່ອຖືກຖາມແນວນີ້ ເຂົາຈະຕອບວ່າ "ແມ່ນ"

ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ເມື່ອເປັນແນວນີ້ ຄຳເວົ້າຂອງຊາຍຜູ້ນັ້ນຈະຖືວ່າເລື່ອນລອຍ ບໍ່ແມ່ນບໍ?"

"ເມື່ອເປັນແນວນີ້ ຄຳເວົ້າຂອງຊາຍຜູ້ນັ້ນຖືວ່າເລື່ອນລອຍແນ່ນອນ ຂ້ານ້ອຍ"

"ອຸທາຍີ ທ່ານກໍແນວນັ້ນຄືກັນ ກ່າວຢູ່ແຕ່ພຽງວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ວັນນະໃດບໍ່ມີວັນນະອື່ນຍິ່ງກວ່າຫຼືປະນີດກວ່າ ວັນນະນັ້ນເປັນວັນນະສູງສຸດ" ແຕ່ບໍ່ໄດ້ຊີ້ວັນນະນັ້ນໃຫ້ຊັດ"

"ຂ້າແດ່ ພຣະອົງຜູ້ຈະເລີນ ແກ້ວໄພທູນອັນງາມ ເກີດເອງຢ່າງບໍຣິສຸດແປດຫລ່ຽມ ນາຍຊ່າງເຈຍຣະໄນດີແລ້ວ ເຊິ່ງເຂົາວາງໄວ້ທີ່ຜ້າກຳພົນເຫຼືອງ ຍ່ອມສ່ອງແສງສະຫວ່າງເປັນປະກາຍອອກມາ ແມ່ນສັນໃດ ອັດຕາກໍມີວັນນະ (ແສງສະຫວ່າງ) ກໍສັນນັ້ນຄືກັນ ຫລັງຈາກຕາຍໄປຍ່ອມເປັນຂອງໝັ້ນຍືນ"

[໔໗໖] "ອຸທາຍີ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ແກ້ວໄພທູນອັນງາມເກີດເອງຢ່າງບໍຣິສຸດແປດຫລ່ຽມ ນາຍຊ່າງເຈຍຣະໄນດີແລ້ວ ເຊິ່ງເຂົາວາງໄວ້ທີ່ຜ້າກຳພົນເຫຼືອງ ຍ່ອມສ່ອງແສງສະຫວ່າງເປັນປະກາຍອອກມາ ກັບຫິ່ງຫ້ອຍໃນຣາຕີທີ່ມີເດືອນມືດ ບັນດາ ວັນນະທັງ ໒ ນີ້ ວັນນະໃດຈະສ່ອງສະຫວ່າງກວ່າ ແລະ ປະນີດກວ່າກັນ"

"ຂ້າແດ່ ພຣະອົງຜູ້ຈະເລີນ ບັນດາວັນນະທັງ ໒ ນີ້ ຫິ່ງຫ້ອຍໃນຣາຕີທີ່ມີເດືອນມືດນີ້ ຍ່ອມສ່ອງສະຫວ່າງກວ່າ ແລະ ປະນີດກວ່າ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຫິ່ງຫ້ອຍໃນຣາຕີທີ່ມີເດືອນມືດ ກັບປະທີບນ້ຳມັນໃນຣາຕີທີ່ມີເດືອນມືດ ບັນດາວັນນະທັງ ໒ ນີ້ ວັນນະໃດຈະສ່ອງສະຫວ່າງກວ່າ ແລະ ປະນີດກວ່າກັນ"

"ບັນດາວັນນະທັງ ໒ ນີ້ ປະທີບນ້ຳມັນໃນຣາຕີທີ່ມີເດືອນມືດສ່ອງສະຫວ່າງກວ່າ ແລະ ປະນີດກວ່າ ຂ້ານ້ອຍ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ປະທີບນ້ຳມັນໃນຣາຕີທີ່ມີເດືອນມືດກັບກອງໄຟໃຫຍ່ໃນຣາຕີທີ່ມີເດືອນມືດ ບັນດາວັນນະທັງ ໒ ນີ້ ວັນນະໃດຈະສ່ອງສະຫວ່າງກວ່າ ແລະປະນີດກວ່າກັນ"

“ບັນດາວັນນະທັງ ໔ ນີ້ ກອງໄຟໃຫຍ່ໃນຣາຕີທີ່ມີເດືອນມືດ ສ່ອງສະຫວ່າງກວ່າ ແລະ ປະນີດກວ່າ ຂ້ານ້ອຍ”

“ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ກອງໄຟໃຫຍ່ໃນຣາຕີທີ່ມີເດືອນມືດ ກັບດາວສຸກໃນນະພາກາດອັນກະຈ່າງປາສະຈາກກ້ອນເພື້ອ ໃນເວລາໃກ້ຮຸ່ງ ບັນດາວັນນະທັງ ໔ ນີ້ ວັນນະໃດຈະສ່ອງສະຫວ່າງກວ່າ ແລະ ປະນີດກວ່າກັນ”

“ບັນດາວັນນະທັງ ໔ ນີ້ ດາວສຸກໃນນະພາກາດອັນກະຈ່າງປາສະຈາກກ້ອນເພື້ອໃນເວລາໃກ້ຮຸ່ງສ່ອງສະຫວ່າງກວ່າແລະປະນີດກວ່າ ພຣະພຸດທະເຈົ້າ”

“ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ດາວສຸກໃນນະພາກາດອັນກະຈ່າງປາສະຈາກກ້ອນເພື້ອ ໃນເວລາໃກ້ຮຸ່ງກັບດວງຈັນເວລາທ່ຽງຄືນກົງ ໃນນະພາກາດອັນກະຈ່າງປາສະຈາກກ້ອນເພື້ອ ໃນມື້ອຸໂປສົດຂຶ້ນ ໑໕ ຄ່ຳ ບັນດາວັນນະທັງ ໔ ນີ້ ວັນນະໃດຈະສ່ອງສະຫວ່າງກວ່າແລະປະນີດກວ່າກັນ”

“ບັນດາວັນນະທັງ ໔ ນີ້ ດວງຈັນເວລາທ່ຽງຄືນກົງ ໃນນະພາກາດອັນກະຈ່າງ ປາສະຈາກກ້ອນເພື້ອ ໃນມື້ອຸໂປສົດຂຶ້ນ ໑໕ ຄ່ຳ ຈະສ່ອງສະຫວ່າງກວ່າ ແລະ ປະນີດກວ່າ ຂ້ານ້ອຍ”

“ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ດວງຈັນໃນເວລາທ່ຽງຄືນກົງໃນນະພາກາດ ອັນກະຈ່າງປາສະຈາກກ້ອນເພື້ອໃນມື້ອຸໂປສົດຂຶ້ນ ໑໕ ຄ່ຳ ກັບດວງອາທິດເວລາທ່ຽງກົງໃນນະພາກາດອັນກະຈ່າງປາສະຈາກກ້ອນເພື້ອ ໃນສາຣະທະການເດືອນທ້າຍແຫ່ງລະດູຝົນ ບັນດາວັນນະທັງ ໔ ນີ້ ວັນນະໃດຈະສ່ອງສະຫວ່າງກວ່າ ແລະ ປະນີດກວ່າກັນ”

“ບັນດາວັນນະທັງ ໔ ນີ້ ດວງອາທິດເວລາທ່ຽງກົງອັນກະຈ່າງປາສະຈາກກ້ອນເພື້ອ ໃນສາຣະທະການເດືອນທ້າຍແຫ່ງລະດູຝົນ ຈະສ່ອງສະຫວ່າງກວ່າແລະປະນີດກວ່າ ຂ້ານ້ອຍ”

“ເທວະດາເຫຼົ່າໃດບໍ່ອາໄສແສງດວງຈັນແລະດວງອາທິດ ເທວະດາເຫຼົ່ານັ້ນມີຫຼາຍ ມີຫຼາຍຍິ່ງກວ່າເຫຼົ່າເທວະດາທີ່ອາໄສແສງດວງຈັນແລະດວງອາທິດ ເຮົາຮູ້ທົ່ວເຖິງເທວະດາ ເຫຼົ່ານັ້ນ ແຕ່ເຮົາກໍບໍ່ກ່າວວ່າ “ເປັນວັນນະທີ່ບໍ່ມີວັນນະອື່ນຍິ່ງກວ່າຫຼືປະນີດກວ່າ” ສ່ວນທ່ານກ່າວວ່າ “ວັນນະທີ່ຊົ່ວກວ່າ ແລະ ເສົ້າໝອງກວ່າທີ່ງທ້ອຍເປັນວັນນະສູງສຸດ” ແຕ່ທ່ານບໍ່ຊີ້ວັນນະນັ້ນໃຫ້ຊັດ”

“ພຣະຜູ້ມີພຣະພາກເຈົ້າຊົງຫັກລ້າງເລື້ອງນີ້ສາແລ້ວ ພຣະສຸຄົດຊົງຫັກລ້າງເລື້ອງນີ້ສາແລ້ວ ຂ້ານ້ອຍ”

"ອຸທາຍີ ເປັນຫຍັງທ່ານຈຶ່ງກ່າວແນວນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງທັກລ້າງເລື້ອງນີ້ສາແລ້ວ ພຣະສຸຄົດຊົງທັກລ້າງເລື້ອງນີ້ສາແລ້ວບໍ"

"ຂ້າແດ່ ພຣະອົງຜູ້ຈະເລີນ ໃນລັດທິອາຈານຂອງຕົນ ຂ້າພຣະອົງທັງຫລາຍມີຄວາມເຫັນແນວນີ້ວ່າ "ວັນນະນີ້ເປັນວັນນະສູງສຸດ ວັນນະນີ້ເປັນວັນນະສູງສຸດ" ຂ້າພຣະອົງເຫຼົ່ານັ້ນເມື່ອຖືກພຣະຜູ້ມີພຣະພາກເຈົ້າສອບສວນ ຊັກຖາມແລ້ວໄລ່ລຽງໃນລັດທິອາຈານຂອງຕົນຈຶ່ງກາຍເປັນຄົນວ່າງ ເປັນຄົນເປົ່າ ຜິດໄປໝົດ"

## ບັນຫາເລື້ອງໂລກທີ່ມີສຸກໂດຍສ່ວນດຽວ

[໔໗໔] "ອຸທາຍີ ໂລກທີ່ມີສຸກໂດຍສ່ວນດຽວມີຢູ່ບໍ ຂໍ້ປະຕິບັດທີ່ມີເຫດເພື່ອເຮັດໃຫ້ແຈ້ງໂລກທີ່ມີສຸກໂດຍສ່ວນດຽວ ມີຢູ່ບໍ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ໃນລັດທິອາຈານຂອງຕົນ ຂ້າພຣະອົງທັງຫລາຍມີຄວາມເຫັນແນວນີ້ວ່າ "ໂລກມີສຸກໂດຍສ່ວນດຽວມີຢູ່ ຂໍ້ປະຕິບັດທີ່ມີເຫດເພື່ອເຮັດໃຫ້ແຈ້ງໂລກ ທີ່ມີສຸກໂດຍສ່ວນດຽວກໍມີຢູ່"

"ຂໍ້ປະຕິບັດທີ່ມີເຫດເພື່ອເຮັດໃຫ້ແຈ້ງໂລກທີ່ມີສຸກໂດຍສ່ວນດຽວນັ້ນ ເປັນແນວໃດ?"

"ຄື ບຸກຄົນລາງຄົນໃນໂລກນີ້ ລະເວັ້ນຂາດຈາກປານາຕິບາດ (ການຂ້າສັດ) ລະເວັ້ນຂາດຈາກອະທິນນາທານ (ການລັກຊັບ) ລະເວັ້ນຂາດຈາກກາເມສຸມິຈສາຈາຣ (ການປະພຶດຜິດໃນກາມ) ລະເວັ້ນຂາດຈາກມຸສາວາທະ (ການເວົ້າຕົວະ) ສະມາທານຄຸນຄືຕະບະແນວໃດ ແນວໜຶ່ງ ປະພຶດຢູ່ ນີ້ແລ ເປັນຂໍ້ປະຕິບັດນັ້ນທີ່ມີເຫດ ເພື່ອເຮັດໃຫ້ແຈ້ງໂລກທີ່ມີສຸກໂດຍສ່ວນດຽວ ຂ້ານ້ອຍ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໃນເວລາທີ່ບຸກຄົນລະເວັ້ນຂາດຈາກປານາຕິບາດ ອັດຕາມີສຸກໂດຍສ່ວນດຽວ ຫຼື ມີສຸກແດ່ ມີທຸກແດ່"

"ມີສຸກແດ່ ມີທຸກແດ່ ຂ້ານ້ອຍ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໃນເວລາທີ່ບຸກຄົນລະເວັ້ນຂາດຈາກອະທິນນາທານ ອັດຕາມີສຸກໂດຍສ່ວນດຽວ ຫຼືມີສຸກແດ່ ມີທຸກແດ່"

"ມີສຸກແດ່ ມີທຸກແດ່ ຂ້ານ້ອຍ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໃນເວລາທີ່ບຸກຄົນລະເວັ້ນຂາດຈາກກາເມສຸມິຈສາ

ຈາຣ ອັດຕາມີສຸກໂດຍສ່ວນດຽວ ຫຼືມີສຸກແດ່ ມີທຸກແດ່"

"ມີສຸກແດ່ ມີທຸກແດ່ ຂ້ານ້ອຍ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໃນເວລາທີ່ບຸກຄົນລະເວັ້ນຂາດຈາກມຸສາວາທະ ອັດຕາມີສຸກໂດຍສ່ວນດຽວ ຫຼືມີສຸກແດ່ ມີທຸກແດ່"

"ມີສຸກແດ່ ມີທຸກແດ່ ຂ້ານ້ອຍ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໃນເວລາທີ່ບຸກຄົນສະມາທານຄຸນຄືຕະບະແນວໃດແນວໜຶ່ງປະພຶດຢູ່ ອັດຕາມີສຸກໂດຍສ່ວນດຽວ ຫຼືມີສຸກແດ່ ມີທຸກແດ່"

"ມີສຸກແດ່ ມີທຸກແດ່ ຂ້ານ້ອຍ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ການຈະອາໄສຂໍ້ປະຕິບັດອັນມີທັງສຸກແລະທຸກແລ້ວເຮັດໃຫ້ແຈ້ງໂລກທີ່ມີສຸກໂດຍສ່ວນດຽວ ມີຢູ່ແດ່ບໍ"

"ພຣະຜູ້ມີພຣະພາກເຈົ້າຊົງຫັກລ້າງເລື້ອງນີ້ສາແລ້ວ ພຣະສຸຄົດຊົງຫັກລ້າງເລື້ອງນີ້ສາແລ້ວ ຂ້ານ້ອຍ"

"ອຸທາຍີ ເປັນຫຍັງທ່ານຈຶ່ງກ່າວແນວນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫັກລ້າງເລື້ອງນີ້ສາແລ້ວ ພຣະສຸຄົດຊົງຫັກລ້າງເລື້ອງນີ້ສາແລ້ວບໍ"

"ຂ້າແດ່ພຣະອົງຜູ້ຈະເລີນ ໃນລັດທິອາຈານຂອງຕົນ ຂ້າພຣະອົງທັງຫລາຍມີຄວາມເຫັນແນວນີ້ວ່າ "ໂລກທີ່ມີສຸກໂດຍສ່ວນດຽວມີຢູ່ ຂໍ້ປະຕິບັດທີ່ມີເຫດເພື່ອເຮັດໃຫ້ແຈ້ງໂລກທີ່ມີສຸກໂດຍສ່ວນດຽວກໍມີຢູ່" ຂ້າພຣະອົງເຫຼົ່ານັ້ນເມື່ອຖືກພຣະຜູ້ມີພຣະພາກເຈົ້າສອບສວນຊັກແລ້ວໄລ່ລຽງໃນລັດທິອາຈານຂອງຕົນກໍເປັນຄົນວ່າງ ເປັນຄົນເປົ່າ ເປັນຄົນຜິດໄປໝົດ

[໔໗໕] ຂ້າແດ່ພຣະອົງຜູ້ຈະເລີນ ໂລກທີ່ມີສຸກໂດຍສ່ວນດຽວມີຢູ່ບໍ ຂໍ້ປະຕິບັດທີ່ມີເຫດເພື່ອເຮັດໃຫ້ແຈ້ງໂລກທີ່ມີສຸກໂດຍສ່ວນດຽວມີຢູ່ບໍ"

"ອຸທາຍີ ໂລກທີ່ມີສຸກໂດຍສ່ວນດຽວມີຢູ່ ຂໍ້ປະຕິບັດທີ່ມີເຫດເພື່ອເຮັດໃຫ້ແຈ້ງໂລກທີ່ມີສຸກໂດຍສ່ວນດຽວກໍມີຢູ່"

## ຊານ ໔

"ຂໍ້ປະຕິບັດທີ່ມີເຫດເພື່ອເຮັດໃຫ້ແຈ້ງໂລກທີ່ມີສຸກໂດຍສ່ວນດຽວນັ້ນ ເປັນແນວໃດ? ຂ້ານ້ອຍ"

"ອຸທາຍີ ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫລາຍແລ້ວ ບັນລຸປະຖົມຊານ ຯລຯ ຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານ ຯລຯ ຢູ່ ຍ້ອນປິຕິຈາງຄາຍອອກ ມີອຸເປກຂາ ມີສະຕິສຳປະຊັນຍະສະເຫວີຍສຸກດ້ວຍນາມກາຍ ບັນລຸ ຕະຕິຍະຊານ ຯລຯ ຢູ່ ນີ້ແລ ເປັນຂໍ້ປະຕິບັດນັ້ນທີ່ມີເຫດເພື່ອເຮັດໃຫ້ແຈ້ງໂລກທີ່ມີສຸກໂດຍ ສ່ວນດຽວ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍ້ປະຕິບັດທີ່ຕັດຕອບບໍ່ແມ່ນຂໍ້ປະຕິບັດທີ່ມີເຫດເພື່ອເຮັດໃຫ້ແຈ້ງໂລກທີ່ມີສຸກໂດຍສ່ວນດຽວໄດ້ ຍ້ອນໂລກທີ່ມີສຸກໂດຍສ່ວນດຽວ ບຸກຄົນເຮັດໃຫ້ແຈ້ງຊັດດ້ວຍຂໍ້ປະຕິບັດພຽງທໍ່ນີ້"

"ອຸທາຍີ ໂລກມີສຸກໂດຍສ່ວນດຽວ ບຸກຄົນບໍ່ອາດເຮັດໃຫ້ແຈ້ງດ້ວຍຂໍ້ປະຕິບັດພຽງ ທໍ່ນີ້ ແຕ່ຂໍ້ປະຕິບັດນັ້ນ ເປັນຂໍ້ປະຕິບັດທີ່ມີເຫດເພື່ອເຮັດໃຫ້ແຈ້ງໂລກທີ່ມີສຸກໂດຍສ່ວນດຽວໄດ້ຢ່າງແນ່ນອນ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ບໍລິສັດຂອງສະກຸລຸທາຍີປະຣິພາຊົກ ໄດ້ບັນລືສຽງອື້ອຶງຂຶ້ນວ່າ "ພວກເຮົາພ້ອມທັງອາຈານຍັງບໍ່ພໍໃຈໃນເຫດນີ້ ພວກເຮົາພ້ອມທັງອາຈານຍັງບໍ່ພໍໃຈໃນເຫດນີ້ ພວກເຮົາຍັງບໍ່ຮູ້ແຈ້ງເຊິ່ງຂໍ້ປະຕິບັດທີ່ຍິ່ງໄປກວ່ານີ້"

ລຳດັບນັ້ນ ສະກຸລຸທາຍີປະຣິພາຊົກຫ້າມປະຣິພາຊົກເຫຼົ່ານັ້ນ ໃຫ້ງຽບສຽງແລ້ວໄດ້ຂາບທູນ ພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ດ້ວຍຂໍ້ປະຕິບັດພຽງທໍ່ໃດ ພິກຂຸນັ້ນຈຶ່ງຈະເຮັດໃຫ້ແຈ້ງໂລກທີ່ມີສຸກໂດຍສ່ວນດຽວໄດ້"

"ອຸທາຍີ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດ ແລະ ໂທມະນັດດັບໄປກ່ອນ ພິກຂຸໃນທຳວິໄນນີ້ ບັນລຸຈະຕຸດຖະຊານ ຯລຯ ຢູ່ ຢືນສົນທະນາປາໄສກັນກັບເທວະດາທັງຫລາຍ ຜູ້ເຂົ້າເຖິງໂລກທີ່ມີສຸກໂດຍສ່ວນດຽວເຫຼົ່ານັ້ນ ອຸທາຍີ ດ້ວຍຂໍ້ປະຕິບັດພຽງທໍ່ນັ້ນແລ ພິກຂຸນັ້ນຈຶ່ງຈະເຮັດໃຫ້ແຈ້ງໂລກທີ່ມີສຸກໂດຍສ່ວນດຽວໄດ້"

[໔໗໖] "ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ ຄົງມຸ້ງຈະເຮັດໃຫ້ແຈ້ງໂລກທີ່ມີສຸກໂດຍສ່ວນດຽວນັ້ນແນ່ນອນ"

"ອຸທາຍີ ບໍ່ແມ່ນພິກຂຸຈະປະພຶດພົມມະຈັນໃນເຮົາ ພຽງເພື່ອເຮັດໃຫ້ແຈ້ງໂລກທີ່ມີສຸກໂດຍສ່ວນດຽວນີ້ທໍ່ນັ້ນ ແທ້ຈິງຍັງມີທຳອື່ນທີ່ດີກວ່າ ແລະປະນີດກວ່າ ທີ່ພິກຂຸປະພຶດພົມມະຈັນໃນເຮົາ ມຸ້ງຈະເຮັດໃຫ້ແຈ້ງ"

"ທຳທີ່ດີກວ່າແລະປະນີດກວ່າທີ່ພິກຂຸປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ ມຸ້ງຈະເຮັດໃຫ້ແຈ້ງນັ້ນຄືອັນໃດ ຂ້ານ້ອຍ"

"ອຸທາຍີ ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍຕົນເອງ ໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກ ໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫລາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ຯລຯ ພິກຂຸນັ້ນລະນີວອນ ໕ ປະການນີ້ ອັນເປັນເຫດເຮັດໃຈໃຫ້ ເສົ້າໝອງ ເປັນຄຣື່ງບັ່ນທອນປັນຍາໄດ້ແລ້ວ ທ່ານສະຫງັດຈາກກາມ ແລະ ອະກຸສົນທຳທັງຫລາຍແລ້ວ ບັນລຸປະຖົມຊານ ຯລຯ ຢູ່ ທຳນີ້ແລດີກວ່າແລະປະນີດກວ່າ ທີ່ພິກຂຸປະພຶດພົມມະຈັນໃນເຮົາ ມຸ້ງຈະເຮັດໃຫ້ແຈ້ງ

ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານ ຯລຯ ຢູ່ ອຸທາຍີ ທຳນີ້ແລ ດີກວ່າແລະປະນີດກວ່າ ທີ່ພິກຂຸປະພຶດພົມມະຈັນໃນເຮົາ ມຸ້ງຈະເຮັດໃຫ້ແຈ້ງ"

## ວິດຊາ ໓

ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດ ໄປເພື່ອປຸບເພນິວາສານຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ຯລຯ ທ່ານຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດແນວນີ້ ທຳນີ້ແລດີກວ່າແລະປະນີດກວ່າ ທີ່ພິກຂຸທັງຫລາຍປະພຶດພົມມະຈັນ ໃນເຮົາ ມຸ້ງຈະເຮັດໃຫ້ແຈ້ງ

ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດ ໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດຜູ້ທີ່ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຯລຯ ທ່ານຮູ້ແຈ້ງ ເຖິງໝູ່ສັດຜູ້ເປັນໄປຕາມກຳ ທຳນີ້ແລດີກວ່າແລະປະນີດກວ່າ ທີ່ພິກຂຸປະພຶດ ພົມມະຈັນໃນເຮົາມຸ້ງຈະເຮັດໃຫ້ແຈ້ງ

ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມ ເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດ ໄປເພື່ອອາສະວັກຂະຍະຍານຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣດ ນີ້ທຸກຂະນິໂຣດຄາມີນີປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸໄທ ນີ້ອາສະວະນິໂຣດ ນີ້ອາສະວະນິໂຣດຄາມີນີປະຕິປະທາ" ເມື່ອທ່ານຮູ້ເຫັນຢູ່ແນວນີ້ ຈິດຍ່ອມລຸດພົ້ນຈາກກາມາສະຫວະ ພະວາດະວະ ແລະ ອະວິດຊາສະຫວະ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນ

ແນວນີ້ອີກຕໍ່ໄປ" ທຳນີ້ແລດີກວ່າແລະປະນີດກວ່າ ທີ່ພິກຂຸປະພຶດພົມມະຈັນໃນເຮົາມຸ້ງຈະເຮັດໃຫ້ແຈ້ງ

ອຸທາຍີ ທຳເຫຼົ່ານີ້ແລ ດີກວ່າແລະປະນີດກວ່າ ທີ່ພິກຂຸປະພຶດພົມມະຈັນໃນເຮົາ ມຸ້ງຈະເຮັດໃຫ້ແຈ້ງ"

## ສະກຸລຸທາຍີປະຣິພາຊົກຂໍບວດ

[໔໗໗] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ສະກຸລຸທາຍີປະຣິພາຊົກໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫລົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເພິ່ງໄດ້ບັນພະຊາອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າເທີ້ນ"

ເມື່ອສະກຸລຸທາຍີປະຣິພາຊົກຂາບທູນແນວນີ້ແລ້ວ ບໍລິສັດຂອງສະກຸລຸທາຍີປະຣິພາຊົກໄດ້ກ່າວຫ້າມສະກຸລຸທາຍີປະຣິພາຊົກວ່າ "ທ່ານອຸທາຍີ ທ່ານຢ່າໄດ້ປະພຶດພົມມະຈັນໃນ ພຣະສະມະນະໂຄດົມເລີຍ ທ່ານເປັນອາຈານແລ້ວຢ່າຍອມເປັນສິດເລີຍ ອຸປະມາຄື ເປັນຂັນນ້ຳແລ້ວຈະລຸດຖານະລົງເປັນຈອກໃນຂັນນ້ຳ ແມ່ນສັນໃດ ຂໍ້ອຸປະໄມນີ້ກໍຈັກມີແກ່ ທ່ານອຸທາຍີສັນນັ້ນຄືກັນ ທ່ານຢ່າໄດ້ປະພຶດພົມມະຈັນໃນພຣະສະມະນະໂຄດົມເລີຍ ທ່ານອຸທາຍີ ທ່ານເປັນອາຈານແລ້ວຢ່າຍອມເປັນສິດເລີຍ"

ເລື້ອງນີ້ເປັນອັນຍຸດຕິໄດ້ວ່າ ບໍລິສັດຂອງສະກຸລຸທາຍີປະຣິພາຊົກ ໄດ້ເຮັດໃຫ້ສະກຸລຸທາຍີປະຣິພາຊົກ ມີອຸປະສັກຕໍ່ການປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ຈູລະສະກຸລຸທາຍີສູດທີ່ ໗ ຈົບ**

# ໑໐. ເວຂະນະສະສູດ

## ວ່າດ້ວຍປະຣິພາຊົກຊື່ເວຂະນະສະ

[໔໗໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ປະຣິພາຊົກຊື່ເວຂະນະສະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ໄດ້ຢືນຢູ່ທີ່ທີ່ສົມຄວນແລ້ວໄດ້ເປ່ງອຸທານໃນສຳນັກພຣະຜູ້ມີພຣະພາກເຈົ້າວ່າ "ນີ້ເປັນວັນນະສູງສຸດ ນີ້ເປັນວັນນະສູງສຸດ"

## ຊົງປຽບທຽບວັນນະ ໔ ແນວ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ກັດຈານະ ເປັນຫຍັງທ່ານຈຶ່ງກ່າວແນວນີ້ວ່າ "ນີ້ເປັນວັນນະສູງສຸດ ນີ້ເປັນວັນນະສູງສຸດ" ວັນນະສູງສຸດນັ້ນເປັນແນວໃດ?"

ເວຂະນະກະປະຣິພາຊົກທູນຕອບວ່າ "ຂ້າແດ່ ທ່ານພຣະໂຄດົມ ວັນນະໃດບໍ່ມີວັນນະອື່ນຍິ່ງກວ່າຫຼືປະນີດກວ່າ ວັນນະນັ້ນເປັນວັນນະສູງສຸດ"

"ວັນນະໃດບໍ່ມີວັນນະອື່ນຍິ່ງກວ່າ ຫຼື ປະນີດກວ່າ ວັນນະນັ້ນເປັນວັນນະໃດນໍ?"

"ວັນນະໃດບໍ່ມີວັນນະອື່ນຍິ່ງກວ່າ ຫຼື ປະນີດກວ່າ ວັນນະນັ້ນເປັນວັນນະ ສູງສຸດຂ້ານ້ອຍ"

"ທ່ານກ່າວແຕ່ພຽງວ່າ "ວັນນະໃດບໍ່ມີວັນນະອື່ນຍິ່ງກວ່າ ຫຼືປະນີດກວ່າ ວັນນະນັ້ນເປັນວັນນະສູງສຸດ" ຄຳທີ່ທ່ານກ່າວນັ້ນເພິ່ງຂະຫຍາຍຄວາມໄດ້ຢ່າງຍືດຍາວ ແຕ່ທ່ານບໍ່ຊີ້ວັນນະນັ້ນໃຫ້ຊັດ ປຽບຄືຊາຍຄົນໜຶ່ງຜາຣິບເຖິງຍິງສາວແນວນີ້ວ່າ "ເຮົາປາຖະໜາຮັກແພງຍິງງາມແຫ່ງຊົນນະບົດນີ້" ຄົນຈະຖາມເຂົາວ່າ "ພໍ່ທ່ານ ທ່ານຮູ້ຈັກ ຍິງຄົນນັ້ນຫຼືວ່າ ເປັນນາງກະສັດ ນາງພຣາມມະນີ ນາງແພດ ຫຼື ນາງສູດ" ເມື່ອຖືກຖາມແນວນີ້ ເຂົາຈະຕອບວ່າ "ບໍ່ຮູ້ຈັກ" ຈະຖືກຖາມຕໍ່ໄປວ່າ "ທ່ານຮູ້ຈັກຍິງຄົນນັ້ນຫຼືວ່າມີຊື່ ຕະກູນ ສູງ ຕ່ຳ ສັນທັດ ດຳ ແຫຼ້ ຫຼື ຜິວເຫຼືອງ ຢູ່ໃນໝູ່ບ້ານ ນິຄົມ ຫຼື ເມືອງນັ້ນ" ເມື່ອຖືກຖາມແນວນີ້ ເຂົາຈະຕອບວ່າ "ຍັງບໍ່ຮູ້ຈັກ" ຈະພູກຖາມຕໍ່ໄປວ່າ "ທ່ານປາຖະໜາຮັກແພງຍິງທີ່ຍັງບໍ່ເຄີຍຮູ້ຈັກທັງບໍ່ເຄີຍເຫັນແນວນັ້ນບໍ" ເມື່ອຖືກຖາມແນວນີ້ ເຂົາຈະຕອບວ່າ "ແມ່ນ"

ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ເມື່ອເປັນແນວນີ້ ຄຳເວົ້າຂອງຊາຍຜູ້ນັ້ນຖືວ່າເລື່ອນລອຍ ບໍ່ແມ່ນບໍ?"

"ເມື່ອເປັນແນວນີ້ ຄຳເວົ້າຂອງຊາຍຜູ້ນັ້ນຖືວ່າເລື່ອນລອຍແນ່ນອນ ຂ້ານ້ອຍ"

"ກັດຈານະ ທ່ານກໍແນວນັ້ນຄືກັນ ກ່າວຢູ່ແຕ່ພຽງວ່າ "ຂ້າແດ່ ທ່ານພຣະໂຄດົມ ວັນນະໃດບໍ່ມີວັນນະອື່ນຍິ່ງກວ່າ ຫຼື ປະນີດກວ່າ ວັນນະນັ້ນເປັນວັນນະສູງສຸດ" ແຕ່ບໍ່ໄດ້ຊີ້ວັນນະນັ້ນໃຫ້ຊັດ"

"ທ່ານພຣະໂຄດົມ ແກ້ວໄພທູນອັນງາມເກີດເອງຢ່າງບໍຣິສຸດແປດຫລ່ຽມ ນາຍຊ່າງເຈຍຣະໄນດີແລ້ວ ເຊິ່ງເຂົາວາງໄວ້ທີ່ຜ້າກຳພົນເຫຼືອງ ຍ່ອມສ່ອງແສງສະຫວ່າງເປັນປະກາຍອອກມາແມ່ນສັນໃດ ອັດຕາດທີ່ມີວັນນະກໍສັນນັ້ນຄືກັນ ຫລັງຈາກຕາຍໄປຍ່ອມເປັນຂອງໝັ້ນຍືນ"

[໔໗໙] ກັດຈານະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ແກ້ວໄພທູນອັນງາມ ເກີດເອງຢ່າງບໍຣິສຸດແປດຫລ່ຽມ ນາຍຊ່າງເຈຍຣະໄນດີແລ້ວ ເຊິ່ງເຂົາວາງໄວ້ທີ່ຜ້າກຳພົນ ເຫຼືອງ ຍ່ອມສ່ອງແສງສະຫວ່າງເປັນປະກາຍອອກມາກັບຫິ່ງຫ້ອຍໃນຣາຕີທີ່ມີເດືອນມືດ ບັນດາ ວັນນະທັງ ໔ ນີ້ ວັນນະໃດຈະສ່ອງສະຫວ່າງກວ່າ ແລະ ປະນີດກວ່າກັນ"

"ບັນດາວັນນະທັງ ໔ ນີ້ ຫິ່ງຫ້ອຍໃນຣາຕີທີ່ມີເດືອນມືດນີ້ຍ່ອມສ່ອງສະຫວ່າງກວ່າແລະປະນີດກວ່າ ຂ້ານ້ອຍ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຫິ່ງຫ້ອຍໃນຣາຕີທີ່ມີເດືອນມືດ ກັບປະທີບນ້ຳມັນໃນຣາຕີທີ່ມີເດືອນມືດ ບັນດາວັນນະທັງ ໔ ນີ້ ວັນນະໃດຈະສ່ອງສະຫວ່າງກວ່າ ແລະ ປະນີດກວ່າກັນ"

"ບັນດາວັນນະທັງ ໔ ນີ້ ປະທີບນ້ຳມັນໃນຣາຕີທີ່ມີເດືອນມືດ ສ່ອງສະຫວ່າງກວ່າແລະປະນີດກວ່າ ຂ້ານ້ອຍ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ປະທີບນ້ຳມັນໃນຣາຕີທີ່ມີເດືອນມືດ ກັບກອງໄຟໃຫຍ່ໃນຣາຕີທີ່ມີເດືອນມືດ ບັນດາວັນນະທັງ ໔ ນີ້ ວັນນະໃດຈະສ່ອງສະຫວ່າງ ແລະ ປະນີດກວ່າກັນ"

"ບັນດາວັນນະທັງ ໔ ນີ້ ກອງໄຟໃຫຍ່ໃນຣາຕີທີ່ມີເດືອນມືດສ່ອງສະຫວ່າງກວ່າ ແລະປະນີດກວ່າ ຂ້ານ້ອຍ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ກອງໄຟໃຫຍ່ໃນຣາຕີທີ່ມີເດືອນມືດກັບດາວສຸກໃນ

ນະພາກາດອັນກະຈ່າງປາສະຈາກກ້ອນເພື້ອໃນເວລາໃກ້ຮຸ່ງ ບັນດາວັນນະທັງ ໔ ນີ້ ວັນນະໃດຈະສ່ອງສະຫວ່າງກວ່າແລະປະນີດກວ່າກັນ"

"ບັນດາວັນນະທັງ ໔ ນີ້ ດາວສຸກໃນນະພາກາດອັນກະຈ່າງປາສະຈາກກ້ອນເພື້ອໃນເວລາໃກ້ຮຸ່ງສ່ອງສະຫວ່າງກວ່າແລະປະນີດກວ່າ ຂ້ານ້ອຍ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ດາວສຸກໃນນະພາກາດອັນກະຈ່າງປາສະຈາກກ້ອນເພື້ອໃນເວລາໃກ້ຮຸ່ງກັບດວງຈັນເວລາທ່ຽງຄືນກົງ ໃນນະພາກາດອັນກະຈ່າງປາສະຈາກກ້ອນເພື້ອໃນມື້ອຸໂປສົດຂຶ້ນ ໑໕ ຄ່ຳ ບັນດາວັນນະທັງ ໔ ນີ້ ວັນນະໃດຈະສ່ອງສະຫວ່າງສະຫວ່າງກວ່າແລະປະນີດກວ່າກັນ"

"ບັນດາວັນນະທັງ ໔ ນີ້ ດວງຈັນເວລາທ່ຽງຄືນກົງ ໃນນະພາກາດອັນກະຈ່າງ ປາສະຈາກກ້ອນເພື້ອ ໃນມື້ອຸໂປສົດຂຶ້ນ ໑໕ ຄ່ຳນີ້ສ່ອງສະຫວ່າງກວ່າ ແລະ ປະນີດກວ່າ ຂ້ານ້ອຍ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ດວງຈັນເວລາທ່ຽງຄືນກົງ ໃນນະພາກາດ ອັນກະຈ່າງປາສະຈາກກ້ອນເພື້ອ ໃນມື້ອຸໂປສົດຂຶ້ນ ໑໕ ຄ່ຳ ກັບດວງອາທິດໃນເວລາທ່ຽງກົງໃນນະພາກາດອັນກະຈ່າງປາສະຈາກກ້ອນເພື້ອ ໃນສາຣະທະການເດືອນທ້າຍແຫ່ງລະດູຝົນ ບັນດາວັນນະທັງ ໔ ນີ້ ວັນນະໃດຈະງາມກວ່າ ແລະ ປະນີດກວ່າກັນ"

"ຂ້າແດ່ ທ່ານພຣະໂຄດົມ ບັນດາວັນນະທັງ ໔ ນີ້ ດວງອາທິດເວລາທ່ຽງກົງ ໃນນະພາກາດອັນກະຈ່າງປາສະຈາກກ້ອນເພື້ອ ໃນສາຣະທະການເດືອນທ້າຍແຫ່ງລະດູຝົນນີ້ ສ່ອງສະຫວ່າງກວ່າ ແລະ ປະນີດກວ່າ"

"ກັດຈານະ ເທວະດາເຫຼົ່າໃດບໍ່ອາໄສແສງດວງຈັນແລະດວງອາທິດ ເທວະດາເຫຼົ່ານັ້ນ ມີຫຼາຍ ມີຫຼາຍຍິ່ງກວ່າເຫຼົ່າເທວະດາທີ່ອາໄສແສງດວງຈັນແລະດວງອາທິດ ເຮົາຮູ້ທົ່ວເຖິງເທວະດາເຫຼົ່ານັ້ນ ແຕ່ເຮົາກໍບໍ່ກ່າວວ່າ "ເປັນວັນນະທີ່ບໍ່ມີວັນນະອື່ນຍິ່ງກວ່າ ຫຼືປະນີດກວ່າ" ສ່ວນທ່ານກ່າວວ່າ "ວັນນະທີ່ຊົ່ວກວ່າແລະເສົ້າໝອງກວ່າຫິ່ງຫ້ອຍ ນັ້ນເປັນວັນນະທີ່ສູງສຸດ" ແຕ່ທ່ານບໍ່ຊີ້ວັນນະນັ້ນໃຫ້ຊັດ

[໔໗໐] ກັດຈານະ ກາມມະຄຸນມີ ໕ ປະການ

ກາມມະຄຸນ ໕ ປະການ ອັນໃດແດ່ ຄື

໑. ຮູບທີ່ຈະຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

໒. ສຽງທີ່ຈະຮູ້ແຈ້ງທາງຫູ ຯລຯ
໓. ກິ່ນທີ່ຈະຮູ້ແຈ້ງທາງດັງ ຯລຯ
໔. ຣົດທີ່ຈະຮູ້ແຈ້ງທາງລີ້ນ ຯລຯ
໕. ໂຜດຖັບພະທີ່ຈະຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ກັດຈານະ ກາມມະຄຸນມີ ໕ ປະການ ນີ້ແລ

ສຸກ ໂສມະນັດທີ່ອາໄສກາມມະຄຸນ ໕ ປະການນີ້ເກີດຂຶ້ນ ເຮົາຮຽກວ່າ ກາມສຸກ ດັ່ງນັ້ນໃນກາມແລະກາມສຸກນັ້ນ ເຮົາຈຶ່ງກ່າວກາມສຸຂວ່າເລີດກວ່າກາມທັງຫລາຍ (ແຕ່) ກ່າວສຸກອັນເລີດກວ່າກາມວ່າເລີດກວ່າກາມສຸກ”

## ສັນເສີນສຸກອັນເລີດກວ່າກາມ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ເວຂະນະກະປະຣິພາຊົກໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

“ທ່ານພຣະໂຄດົມ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ຂໍ້ທີ່ໃນກາມແລະກາມສຸກນັ້ນທ່ານພຣະໂຄດົມຕັດກາມສຸຂວ່າເລີດກວ່າກາມທັງຫລາຍ (ແຕ່) ຕັດສຸກອັນເລີດກວ່າກາມວ່າ ເລີດກວ່າກາມສຸກ ຊື່ວ່າຕັດດີແລ້ວ”

“ກັດຈານະ ຂໍ້ທີ່ວ່າ “ກາມກໍດີ ກາມສຸກກໍດີ ສຸກອັນເລີດກວ່າກາມກໍດີ” ນີ້ທ່ານ ຜູ້ມີທິດຖິແຕກຕ່າງກັນ ມີຄວາມຖືກໃຈແຕກຕ່າງກັນ ມີຄວາມພໍໃຈແຕກຕ່າງກັນ ມີຄວາມມຸ້ງໝາຍແຕກຕ່າງກັນ ມີອາຈານແຕກຕ່າງກັນຈຶ່ງຮູ້ໄດ້ຍາກ ພິກຂຸເຫຼົ່າໃດເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາລະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງ ພິກຂຸເຫຼົ່ານັ້ນແລ ຈະເພິ່ງຮູ້ກາມ ກາມສຸກ ຫຼື ສຸກອັນເລີດກວ່າກາມນີ້ໄດ້”

[໒໗໑] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ເວຂະນະກະປະຣິພາຊົກ ໂກດ ບໍ່ພໍໃຈ ເມື່ອຈະດ່າວ່າເຍາະເຍີ້ຍພຣະຜູ້ມີພຣະພາກເຈົ້າ ຄິດວ່າ “ເຮົາຈັກເຮັດໃຫ້ພຣະສະມະນະໂຄດົມໄດ້ຮັບ ຄວາມເສຍຫາຍ” ຈຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

“ເມື່ອເປັນເຊັ່ນນັ້ນ ສະມະນະພາມລາງພວກໃນໂລກນີ້ ບໍ່ຮູ້ເງື່ອນເບື້ອງຕົ້ນ ບໍ່ເຫັນເງື່ອນເບື້ອງປາຍ ແຕ່ຍັງຍັ້ງຢືນຢູ່ວ່າ ເຮົາຮູ້ແຈ້ງວ່າ “ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ” ຄຳກ່າວຂອງ ສະມະນະພາມ

ເຫຼົ່ານັ້ນເຖິງຄວາມເປັນຄຳໜ້າຫົວສຽງ ເປັນຄຳຕ່ຳຊ້າ ເປັນຄຳເປົ່າ ເປັນຄຳບໍ່ໄວ້ວາງໃຈຢ່າງແນ່ນອນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ກັດຈາໃນສະມະນະພາມເຫຼົ່າໃດ ເມື່ອບໍ່ຮູ້ເງື່ອນເບື້ອງຕົ້ນ ບໍ່ເຫັນເງື່ອນເບື້ອງປາຍ ຍັງຢັ້ງຢືນວ່າ "ເຮົາຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ" ສະມະນະພາມເຫຼົ່ານັ້ນຖືກຂົ່ມກໍຊອບຢູ່ ແຕ່ດາງງົດເງື່ອນເບື້ອງຕົ້ນ ແລະ ເງື່ອນເບື້ອງປາຍໄວ້ກ່ອນ ຂໍໃຫ້ວິນຍູຊົນຜູ້ບໍ່ໂອ້ອວດ ບໍ່ມີມານຍາ ເປັນຄົນຊື່ກົງ ຈົ່ງມາເທີ້ນ ເຮົາຈະສັ່ງສອນ ເຮົາຈັກ ສະແດງທຳ ເມື່ອເຂົາປະຕິບັດຕາມຄຳພ່ຳສອນ ບໍ່ດົນກໍຈັກຮູ້ເອງ ເຫັນເອງ ໄດ້ຮູ້ວ່າ ຄວາມລຸດພົ້ນໂດຍຖືກຕ້ອງຈາກເຄື່ອງມັດຄືອະວິດຊາກໍເປັນແນວນັ້ນ

ກັດຈານະ ເດັກອ່ອນທີ່ຍັງນອນຫງາຍ ຖືກເຄື່ອງມັດທີ່ເຮັດດ້ວຍດ້າຍມັດໄວ້ທີ່ຂໍ້ຕີນທັງສອງ ທີ່ຂໍ້ມືທັງສອງແລະທີ່ຄໍລວມເປັນ ໕ ແຫ່ງ ເຄື່ອງມັດເຫຼົ່ານັ້ນຈະລຸດໄປເມື່ອເດັກໃຫຍ່ຂຶ້ນມາຂຶ້ນ ແລະມີຮ່າງກາຍແຂງແຮງຂຶ້ນ ເຂົາຈຶ່ງຮູ້ວ່າ "ເຮົາລຸດພົ້ນແລ້ວແລະເຄື່ອງມັດກໍບໍ່ມີແກ່ເຮົາ" ແມ່ນສັນໃດ ວິນຍູຊົນ ຜູ້ບໍ່ໂອ້ອວດ ບໍ່ມີມານຍາ ເປັນຄົນຊື່ກົງ ກໍສັນນັ້ນຄືກັນ ຂໍຈົ່ງມາເທີ້ນເຮົາຈັກສັ່ງສອນ ຈັກສະແດງທຳ ເມື່ອເຂົາປະຕິບັດຕາມຄຳພ່ຳສອນແລ້ວ ບໍ່ດົນກໍຈັກຮູ້ເອງ ເຫັນເອງ ໄດ້ຮູ້ວ່າ ຄວາມລຸດພົ້ນໂດຍຖືກຕ້ອງຈາກເຄື່ອງມັດຄື ອະວິດຊາກໍເປັນແນວນັ້ນ"

## ປະຣິພາຊິກຊື່ເວຂະນະສະສະແດງຕົນເປັນອຸປາສົກ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ເວຂະນະກະປະຣິພາຊົກໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຂໍທ່ານພຣະໂຄດົມ ຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" ດັ່ງນີ້ແລ

**ເວຂະນະສະສູດທີ່ ໑໐ ຈົບ**

**ປະຣິພາຊົກວັກທີ່ ໓ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

໑. ຈູລະວັດສະໂຄດຕະສູດ

໔. ອັກຄິວັດສະໂຄດຕະສູດ

# ໔. ຣາຊະວັກ

## ໝວດວ່າດ້ວຍພຣະຣາຊາ

# ໑. ຄະຕິກາຣະສູດ

## ວ່າດ້ວຍຊ່າງໝໍ້ຊື່ຄະຕິກາຣະ

[໔໗໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ສະເດັດຈາຣິກໄປໃນແຄວັ້ນໂກສົນພ້ອມກັບພິກຂຸສົງໝູ່ໃຫຍ່ ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າ ສະເດັດແວອອກຈາກທາງແລ້ວໄດ້ຊົງແຍ້ມພຣະໂອດໃນສະຖານທີ່ແຫ່ງໜຶ່ງ ຄັ້ງນັ້ນ ທ່ານພຣະອານົນໄດ້ຄິດວ່າ “ອັນໃດນໍ ເປັນເຫດເປັນປັດໄຈໃຫ້ພຣະຜູ້ມີພຣະພາກເຈົ້າຊົງຍິ້ມ ຍ້ອນພຣະຕະຖາຄົດທັງຫລາຍຍ່ອມບໍ່ຊົງແຍ້ມພຣະໂອດໂດຍບໍ່ມີສາເຫດ”

ລຳດັບນັ້ນ ທ່ານພຣະອານົນຈຶ່ງຫົ່ມຜ້າອຸດຕະຣາສົງບ່ຽງບ່າ ປະນົມອັນຊະລີໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໄດ້ທູນຖາມພຣະອົງວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍເປັນເຫດເປັນປັດໄຈໃຫ້ພຣະຜູ້ມີພຣະພາກເຈົ້າຊົງແຍ້ມພຣະໂອດ ຍ້ອນພຣະຕະຖາຄົດທັງຫລາຍບໍ່ຊົງແຍ້ມພຣະໂອດໂດຍບໍ່ມີສາເຫດ”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ອານົນ ເລື້ອງເຄີຍມີມາແລ້ວ ໃນສະຖານທີ່ແຫ່ງນີ້ມີນິຄົມຊື່ເວຄະລິງຄະ ເປັນນິຄົມຮັ່ງມີ ອຸດົມສົມບູນ ມີປະຊາກອນຫຼາຍ ມີພົນລະເມືອງໜາແໜ້ນ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າຊົງອາໄສເວຄະລິງຄະນິຄົມຢູ່ ໄດ້ຂ່າວວ່າ ທີ່ນີ້ເຄີຍເປັນອາຮາມຂອງພຣະຜູ້ມີພຣະພາກເຈົ້າພຣະ

ນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນມາກ່ອນ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກັດສະປະຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າປະທັບນັ່ງຕັດສອນພິກຂຸສົງໃນທີ່ນີ້"

ຄັ້ງນັ້ນ ທ່ານພຣະອານົນໄດ້ປູລາດຜ້າສັງຄາຕິເປັນ ໔ ຊັ້ນຖວາຍແລ້ວຂາບທູນ ພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າເຊັ່ນນັ້ນ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງປະທັບນັ່ງໃນທີ່ນີ້ເທີ້ນ ພາກພື້ນສ່ວນນີ້ຈັກເປັນສ່ວນທີ່ພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ໔ ພຣະອົງຊົງໃຊ້ສອຍ"

ພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ໄດ້ຮັບສັ່ງຮຽກທ່ານພຣະອານົນມາຕັດ ວ່າ

"ອານົນ ເລື້ອງເຄີຍມີມາແລ້ວ ໃນສະຖານທີ່ແຫ່ງນີ້ ມີນິຄົມຊື່ເວຄະລິງຄະ ເປັນນິຄົມຮັ່ງມີ ອຸດົມສົມບູນ ມີປະຊາກອນຫຼາຍ ມີພົນລະເມືອງໜາແໜ້ນ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຊົງອາໄສເວຄະລິງຄະນິຄົມຢູ່ ໄດ້ຂ່າວວ່າ ທີ່ນີ້ເຄີຍເປັນອາຣາມຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນມາກ່ອນ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ໄດ້ປະທັບນັ່ງຕັດສອນພິກຂຸສົງໃນທີ່ນີ້

[໔໗໓] ອານົນ ໃນເວຄະລິງຄະນິຄົມ ໄດ້ມີຊ່າງໝໍ້ຊື່ຄະຕິກາຣະເປັນອຸປັດຖາກຜູ້ເລີດຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ມີມານົບ ຊື່ໂຊຕິປາລະເປັນສະຫາຍທີ່ຮັກກັນຂອງຊ່າງໝໍ້ຊື່ຄະຕິກາຣະ ຄັ້ງນັ້ນ ຊ່າງໝໍ້ຊື່ຄະຕິກາຣະຮຽກໂຊຕິປາລະມານົບມາກ່າວວ່າ "ມາເທີ້ນ ໂຊຕິປາລະເພື່ອນຮັກ ເຮົາຈັກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້ານຳກັນ ຍ້ອນວ່າການທີ່ເຮົາໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຖືກັນວ່າເປັນຄວາມດີ"

ເມື່ອຊ່າງໝໍ້ຊື່ຄະຕິກາຣະກ່າວແນວນີ້ແລ້ວ ໂຊຕິປາລະມານົບໄດ້ກ່າວວ່າ "ຢ່າເລີຍ ຄະຕິກາຣະເພື່ອນຮັກ ການເຫັນພຣະສະມະນະໂລ້ນນັ້ນຈະມີປະໂຫຍດອັນໃດ"

ແມ່ນເທື່ອທີ ໔ ຯລຯ

ແມ່ນເທື່ອທີ ໓ ຊ່າງໝໍ້ຊື່ຄະຕິກາຣະໄດ້ກ່າວກັບໂຊຕິປາລະມານົບວ່າ "ມາເທີ້ນ ໂຊຕິປາ

ລະເພື່ອນຮັກ ເຮົາຈັກເຂົ້າໄປເຝົ້າພຣະຜູ້ພຣະພາກພຣະນາມວ່າ ກັດສະປະຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້ານຳກັນ ຍ້ອນວ່າການທີ່ເຮົາໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຖືກັນວ່າເປັນຄວາມດີ"

ແມ່ນເທື່ອທີ ໓ ໂຊຕິປາລະມານົບໄດ້ກ່າວວ່າ "ຢ່າເລີຍ ຄະຕິກາຣະເພື່ອນຮັກ ການເຫັນພຣະສະມະນະໂລ້ນນັ້ນຈະມີປະໂຫຍດອັນໃດ"

ຊ່າງໝໍ້ຊື່ຄະຕິກາຣະຈຶ່ງກ່າວວ່າ "ໂຊຕິປາລະເພື່ອນຮັກ ຖ້າເຊັ່ນນັ້ນ ເຮົານຳຈຸຣະນະ ຖູໂຕ໑ໄປສູ່ແມ່ນ້ຳເພື່ອອາບນ້ຳກັນເທີ້ນ" ໂຊຕິປາລະມານົບຮັບຄຳແລ້ວ ລຳດັບນັ້ນ ຊ່າງໝໍ້ ຊື່ຄະຕິກາຣະ ແລະ ໂຊຕິປາລະມານົບ ໄດ້ນຳຈຸຣະນະຖູໂຕໄປສູ່ແມ່ນ້ຳເພື່ອອາບນ້ຳ

[໔໗໔] ອານົນ ຕໍ່ມາ ຊ່າງໝໍ້ຊື່ຄະຕິກາຣະ ໄດ້ຮຽກໂຊຕິປາລະມານົບມາກ່າວວ່າ "ໂຊຕິປາລະເພື່ອນຮັກ ບ່ອນນີ້ບໍ່ໄກຈາກພຣະອາຣາມຂອງພຣະຜູ້ມີພຣະພາກເຈົ້າ ພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ມາເທີ້ນ ໂຊຕິປາລະເພື່ອນຮັກ ເຮົາຈັກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້ານຳກັນ ຍ້ອນວ່າການທີ່ເຮົາໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຖືກັນວ່າເປັນຄວາມດີ"

ເມື່ອຊ່າງໝໍ້ຊື່ຄະຕິກາຣະກ່າວແນວນີ້ແລ້ວ ໂຊຕິປາລະມານົບໄດ້ກ່າວວ່າ "ຢ່າເລີຍ ຄະຕິກາຣະເພື່ອນຮັກ ການເຫັນພຣະສະມະນະໂລ້ນນັ້ນ ຈະມີປະໂຫຍດອັນໃດ?"

ແມ່ນເທື່ອທີ ໔ ຯລຯ

ແມ່ນເທື່ອທີ ໓ ຊ່າງໝໍ້ ຊື່ຄະຕິກາຣະໄດ້ກ່າວວ່າ "ໂຊຕິປາລະເພື່ອນຮັກ ບ່ອນນີ້ບໍ່ໄກຈາກພຣະອາຣາມຂອງພຣະຜູ້ມີພຣະພາກເຈົ້າ ພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້ານັກ ມາເທີ້ນ ໂຊຕິປາລະເພື່ອນຮັກ ເຮົາຈັກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າພຣະນາມ ວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້ານຳກັນ ຍ້ອນວ່າການທີ່ເຮົາໄດ້ເຫັນ ພຣະຜູ້ມີພຣະພາກເຈົ້າ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຖືກັນວ່າເປັນຄວາມດີ"

ແມ່ນເທື່ອທີ ໓ ໂຊຕິປາລະມານົບກໍກ່າວວ່າ "ຢ່າເລີຍ ຄະຕິກາຣະເພື່ອນຮັກ ການເຫັນພຣະສະມະນະໂລ້ນນັ້ນຈະມີປະໂຫຍດອັນໃດ?"

ລຳດັບນັ້ນ ຊ່າງໝໍ້ຊື່ຄະຕິກາຣະໄດ້ຈັບຖົງຂອງໂຊຕິປາລະມານົບແລ້ວກ່າວວ່າ "ໂຊຕິປາລະເພື່ອນຮັກ ບ່ອນນີ້ບໍ່ໄກຈາກພຣະອາຣາມຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກັດສະປະ

ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້ານັກ ມາເທີ້ນ ໂຊຕິປາລະເພື່ອນຮັກ ເຮົາຈັກເຂົ້າໄປເຝົ້າ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້ານຳກັນ ຍ້ອນວ່າການທີ່ເຮົາໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຖືກັນວ່າເປັນຄວາມດີ"

ລຳດັບນັ້ນ ໂຊຕິປາລະມານົບໃຫ້ຊ່າງໝໍ້ ຊື່ຄະຕິກາຣະປ່ອຍຖົງແລ້ວກ່າວວ່າ "ຢ່າເລີຍຄະຕິກາຣະເພື່ອນຮັກ ການເຫັນພຣະສະມະນະໂລ້ນນັ້ນ ຈະມີປະໂຫຍດອັນໃດ?"

ຊ່າງໝໍ້ຊື່ ຄະຕິກາຣະນັ້ນຈັບທີ່ຂ້າພະເຈົ້າຂອງໂຊຕິປາລະມານົບຜູ້ອາບນ້ຳດຳຫົວແລ້ວກ່າວວ່າ "ໂຊຕິປາລະເພື່ອນຮັກ ບ່ອນນີ້ບໍ່ໄກຈາກພຣະອາຣາມຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້ານັກ ມາເທີ້ນ ໂຊຕິປາລະເພື່ອນຮັກ ເຮົາຈັກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້ານຳກັນ ຍ້ອນວ່າການທີ່ເຮົາໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຖືກັນວ່າເປັນຄວາມດີ"

ຕໍ່ມາ ໂຊຕິປາລະມານົບໄດ້ຄິດວ່າ "ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທີ່ຊ່າງໝໍ້ ຊື່ຄະຕິກາຣະຜູ້ມີສະກຸລຣຸນຊາດຕ່ຳ ບັງອາດມາຈັບຜົມຂອງເຮົາຜູ້ອາບນ້ຳດຳຫົວແລ້ວ ການທີ່ເຮົາຈະໄປດ້ວຍນີ້ ເຫັນຈະບໍ່ແມ່ນເລື້ອງເລັກນ້ອຍ" ແລ້ວໄດ້ກ່າວກັບຊ່າງໝໍ້ຊື່ຄະຕິກາຣະວ່າ "ຄະຕິກາຣະເພື່ອນຮັກ ການທີ່ເພື່ອນທຳຄວາມພະຍາຍາມຕັ້ງແຕ່ເວົ້າຊັກຊວນ ຈັບປາຍຖົງຈົນລາມມາຮອດຜົມຂອງເຮົານັ້ນ ກໍເພື່ອຈະຊວນໃຫ້ໄປໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ທໍ່ນັ້ນເອງບໍ"

ຊ່າງໝໍ້ຊື່ຄະຕິກາຣະກ່າວວ່າ "ທໍ່ນັ້ນເອງ ໂຊຕິປາລະເພື່ອນຮັກ ຈິງແນວນັ້ນ ການທີ່ເຮົາໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຖືກັນວ່າເປັນຄວາມດີ"

ໂຊຕິປາລະມານົບກ່າວວ່າ "ຄະຕິກາຣະເພື່ອນຮັກ ຖ້າເຊັ່ນນັ້ນ ປ່ອຍເຮົາເທີ້ນ ພວກເຮົາຈັກໄປນຳກັນ"

[໔໓໕] ອານົນ ຄັ້ງນັ້ນ ຊ່າງໝໍ້ຊື່ ຄະຕິກາຣະ ແລະ ໂຊຕິປາລະມານົບໄດ້ເຂົ້າ ໄປເຝົ້າພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າຮອດບ່ອນຢູ່ ຊ່າງໝໍ້ຊື່ຄະຕິກາຣະຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກັດສະປະຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ສ່ວນໂຊຕິປາລະມານົບໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມ

ຄວນ ຊ່າງໝໍ້ ຊື່ຄະຕິກາຣະຜູ້ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ນີ້ຄື ໂຊຕິປາລະມານົບຜູ້ເປັນສະຫາຍຮັກກັນຂອງຂ້າພຣະອົງ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງສະແດງທຳແກ່ໂຊຕິປາລະມານົບນີ້ເທີ້ນ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຊົງຊີ້ແຈ່ງໃຫ້ຊ່າງໝໍ້ຊື່ຄະຕິກາຣະ ແລະ ໂຊຕິປາລະມານົບເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສ ດ້ວຍທຳມີກະຖາ ຈາກນັ້ນ ຊ່າງໝໍ້ຊື່ຄະຕິກາຣະ ແລະ ໂຊຕິປາລະມານົບຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າຊົງພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຊົງຊີ້ແຈ່ງໃຫ້ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ແລ້ວລຸກຈາກບ່ອນນັ່ງ ຖວາຍອະພິວາດພຣະຜູ້ມີ ພຣະພາກພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າກະທຳປະທັກຂິນແລ້ວຈາກໄປ

[໔໗໖] ອານົນ ຄັ້ງນັ້ນ ໂຊຕິປາລະມານົບໄດ້ຖາມຊ່າງໝໍ້ຊື່ ຄະຕິກາຣະວ່າ "ຄະຕິກາຣະເພື່ອນຮັກ ທ່ານເມື່ອຟັງທຳນີ້ ຫລັງຈາກນີ້ຈະອອກຈາກເຮືອນບວດເປັນບັນພະຊິດແມ່ນບໍ?"

ຊ່າງໝໍ້ຊື່ຄະຕິກາຣະຕອບວ່າ "ໂຊຕິປາລະເພື່ອນຮັກ ທ່ານກໍຮູ້ຢູ່ບໍ່ແມ່ນບໍວ່າ "ເຮົາຕ້ອງລ້ຽງເບິ່ງມານດາບິດາເຊິ່ງເປັນຄົນຕາບອດ ແລະ ເຖົ້າຊະຣາ"

ໂຊຕິປາລະມານົບຈຶ່ງກ່າວວ່າ "ຄະຕິກາຣະເພື່ອນຮັກ ຖ້າເຊັ່ນນັ້ນ ເຮົາຈັກອອກຈາກເຮືອນບວດເປັນບັນພະຊິດເອງ"

ລຳດັບນັ້ນ ຊ່າງໝໍ້ຊື່ຄະຕິກາຣະ ແລະ ໂຊຕິປາລະມານົບໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າຮອດບ່ອນຢູ່ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ຊ່າງໝໍ້ຊື່ ຄະຕິກາຣະໄດ້ຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ນີ້ຄື ໂຊຕິປາລະມານົບ ຜູ້ເປັນສະຫາຍຮັກກັນຂອງຂ້າພຣະອົງ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງບວດ ໃຫ້ໂຊຕິປາລະມານົບນີ້ດ້ວຍເທີ້ນ"

ໂຊຕິປາລະມານົບໄດ້ບັນພະຊາອຸປະສົມບົດແລ້ວ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ

# ເລື້ອງພຣະເຈົ້າກາສີພຣະນາມວ່າກິກີ

[໔໙໓] ອານົນ ຄັ້ງນັ້ນ ເມື່ອໂຊຕິປາລະມານົບອຸປະສົມບົດໄດ້ບໍ່ດົນປະມານເຄິ່ງເດືອນ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ປະທັບຢູ່ໃນເວຄະລິງຄະນິຄົມຕາມຄວນແກ່ອັດທະຍາໄສແລ້ວ ສະເດັດຈາຣິກໄປທາງເຂດນະຄອນພາຣານະສີ ສະເດັດຈາຣິກໄປແລ້ວໂດຍລຳດັບ ຈົນເຖິງນະຄອນພາຣານະສີ

ອານົນ ໄດ້ຂ່າວວ່າ ໃນເວລານັ້ນ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ປະທັບຢູ່ທີ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນ ພາຣານະສີ ພຣະເຈົ້າກາສີຊົງພຣະນາມວ່າກິກີຊົງສະດັບຂ່າວວ່າ "ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ສະເດັດມາເຖິງນະຄອນພາຣານະສີ ປະທັບຢູ່ທີ່ປ່າອິສິປະຕະນະມຣິທາຍະວັນ" ລຳດັບນັ້ນ ພຣະເຈົ້າກາສີຊົງພຣະນາມວ່າກິກີ ຮັບສັ່ງໃຫ້ຈັດຍານພາຫະນະຄັນງາມ ໆ ຫຼາຍຄັນ ຊົງຂຶ້ນຍານພາຫະນະຄັນງາມສະເດັດຈາກ ເຂດນະຄອນພາຣານະສີພ້ອມກັບຍານພາຫະນະຄັນງາມ ໆ ຕາມສະເດັດດ້ວຍຣາຊານຸພາບແນວ ຍິ່ງໃຫຍ່ ເພື່ອຊົງຢ້ຽມພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາ-ສຳພຸດທະເຈົ້າພຣະອົງນັ້ນ ສະເດັດໄປຈົນສຸດທາງທີ່ຍານພາຫະນະຈະໄປໄດ້ ຈຶ່ງສະເດັດລົງຈາກຍານສະເດັດພຣະຣາດຊະດຳເນີນໄປດ້ວຍພຣະບາດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຊົງຊີ້ແຈ່ງໃຫ້ພຣະເຈົ້າກາສີຊົງພຣະນາມວ່າກິກີຊົງເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າຮວຍຮ່ຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ພຣະເຈົ້າກາສີ ຊົງພຣະນາມວ່າກິກີຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຊົງຊີ້ແຈ່ງໃຫ້ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານ ແກ່ກ້າ ຮວຍຮ່ຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ຈຶ່ງໄດ້ຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸສົງ ຈົ່ງຊົງຮັບພັດຕາຫານຂອງ ຂ້ານ້ອຍໃນມືອື່ນນີ້ເທີ້ນ"

ພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຊົງຮັບ ນິມົນໂດຍດຸດສະນີພາບ

ຄັ້ງນັ້ນ ພຣະເຈົ້າກາສີພຣະນາມວ່າ ກິກີ ຊົງຮູ້ອາການທີ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຊົງຮັບນິມົນແລ້ວ ຈຶ່ງຊົງລຸກຈາກທີ່ປະທັບ ຖວາຍອະພິວາດ ຊົງກະທຳປະທັກຂິນແລ້ວສະເດັດຈາກໄປ ເມື່ອຜ່ານຄືນນັ້ນໄປ

ພຣະເຈົ້າກາສີພຣະນາມວ່າ ກິກີ ໄດ້ຮັບສັ່ງໃຫ້ຕົກແຕ່ງຂອງຫຍໍ້າຂອງຂ້ອຍອັນປະນີດ ລ້ວນເປັນເຂົ້າວິດເຊິ່ງອ່ອນລະມຸນ ເກັບກາກອອກໝົດແລ້ວ ມີແກງແລະກັບຫຼາຍແນວ ໃນພຣະຣາຊະນິເວດຂອງພຣະອົງ ແລ້ວຮັບສັ່ງໃຫ້ຣາຊະບຸຣຸດຂາບທູນພັດຕະການແດ່ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າວ່າ “ຂ້າແດ່ ພຣະໂຄດົມຜູ້ຈະເລີນ ໄດ້ເວລາແລ້ວ ພັດຕາຫານສຳເລັດແລ້ວ ຂ້ານ້ອຍ”

[໔໗໗] ອານົນ ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຊົງຄອງອັນຕະຣະວາສົກຖືບາດແລະຈີວອນສະເດັດເຂົ້າໄປສູ່ພຣະຣາຊະນິເວດຂອງພຣະເຈົ້າກາສີພຣະນາມວ່າກິກີ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ພ້ອມດ້ວຍພິກຂຸສົງ ລຳດັບນັ້ນ ພຣະເຈົ້າກາສີພຣະນາມວ່າກິກີຊົງອັງຄາດພິກຂຸສົງມີພຣະພຸດທະເຈົ້າເປັນປະມຸກ ໃຫ້ອີ່ມໜຳສຸກສະບາຍດ້ວຍຂອງຫຍໍ້າຂອງຂ້ອຍອັນປະນີດດ້ວຍ ພຣະອົງເອງ ເມື່ອພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ສະເຫວີຍສຳເລັດ ຊົງວາງພຣະຫັດແລ້ວ ພຣະເຈົ້າກາສີຊົງພຣະນາມວ່າກິກີກໍເລືອກປະທັບນັ່ງຢູ່ບ່ອນທີ່ສົມຄວນທີ່ໃດທີ່ໜຶ່ງເຊິ່ງຕໍ່າກວ່າ ແລ້ວໄດ້ຂາບທູນວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະ ຜູ້ມີພຣະພາກເຈົ້າຊົງຮັບນິມົນການຢູ່ຈຳພັນສາ ໃນນະຄອນພາຣານະສີຂອງຂ້ານ້ອຍເທີ້ນ ພຣະສົງຈັກໄດ້ຮັບການບຳລຸງເຫັນຢູ່ແນວນັ້ນ”

ພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດວ່າ “ຢ່າເລີຍ ມະຫາບໍພິດ ອາດຕະມາພາບຮັບນິມົນການຢູ່ຈຳພັນສາໄວ້ແລ້ວ”

ແມ່ນເທື່ອທີ ໒ ໗ລ໗

ແມ່ນເທື່ອທີ ໓ ພຣະເຈົ້າກາສີພຣະນາມວ່າກິກີໄດ້ຂາບທູນວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນການຢູ່ຈຳພັນສາ ໃນນະຄອນພາຣານະສີຂອງຂ້ານ້ອຍເທີ້ນ ພຣະສົງຈັກໄດ້ຮັບການບຳລຸງເຫັນຢູ່ແນວນັ້ນ”

ພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດວ່າ “ຢ່າເລີຍ ມະຫາບໍພິດ ອາດຕະມາພາບຮັບນິມົນການຢູ່ຈຳພັນສາໄວ້ແລ້ວ”

ຄັ້ງນັ້ນ ພຣະເຈົ້າກາສີພຣະນາມວ່າກິກີ ຊົງເສຍພຣະຫະໄທ ຊົງໂທມະນັດວ່າ “ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ບໍ່ຊົງຮັບນິມົນການຢູ່ຈຳພັນສາ ໃນນະຄອນພາຣານະສີຂອງເຮົາ” ຈາກນັ້ນ ໄດ້ທູນຖາມວ່າ “ຂ້າແດ່ພຣະອົງ ຜູ້ຈະເລີນ ມີໃຜອື່ນທີ່ເປັນຜູ້ອຸປັດຖາກຍິ່ງກວ່າຂ້ານ້ອຍອີກບໍ? ຂ້ານ້ອຍ”

## ພຣະກັສສະປະພຸດທະເຈົ້າຊົງສັນເສີນຊ່າງໝໍ້ຊື່ຄະຕິກາຣະ

ພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຕັດວ່າ “ມະຫາບໍພິດ ມີນິຄົມຊື່ເວຄະລິງຄະ ຊ່າງໝໍ້ຊື່ຄະຕິກາຣະຢູ່ໃນນິຄົມນັ້ນເຂົາເປັນອຸປັດຖາກຜູ້ເລີດຂອງອາດຕະມາພາບ” ພຣະອົງຊົງເສຍພຣະທະໄທ ມີຄວາມໂທມະນັດວ່າ “ພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ບໍ່ຊົງຮັບນິມົນການຢູ່ຈຳພັນສາ ໃນນະຄອນພາຣານະສີຂອງເຮົາ”

ແຕ່ຄວາມເສຍໃຈ ແລະ ຄວາມໂທມະນັດນັ້ນຍ່ອມບໍ່ມີ ແລະ ຈັກບໍ່ມີແກ່ຊ່າງໝໍ້ຊື່ຄະຕິກາຣະ ຍ້ອນຊ່າງໝໍ້ຊື່ຄະຕິກາຣະເຖິງພຣະພຸດທະເຈົ້າເປັນສະຣະນະ ເຖິງພຣະທຳເປັນສະຣະນະເຖິງພຣະສົງ ເປັນສະຣະນະ ເວັ້ນຂາດຈາກປານາຕິບາດ(ການຂ້າສັດ) ເວັ້ນຂາດຈາກອະທິນນາທານ (ການລັກຊັບ) ເວັ້ນຂາດຈາກກາເມສຸມິຈສາຈາຣ (ການປະພຶດຜິດໃນກາມ) ເວັ້ນຂາດຈາກມຸສາວາທະ (ການເວົ້າຕົວະ) ເວັ້ນຂາດຈາກສຸຣາເມຣະຍະມັຊຊປະມາທັດຖານ (ການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ)

ຊ່າງໝໍ້ຊື່ຄະຕິກາຣະເປັນຜູ້ປະກອບດ້ວຍຄວາມເຫຼື້ອມໃສໝັ້ນຄົງໃນພຣະພຸດທະເຈົ້າເປັນຜູ້ ປະກອບດ້ວຍຄວາມເຫຼື້ອມໃສໝັ້ນຄົງໃນພຣະທຳ ເປັນຜູ້ປະກອບດ້ວຍຄວາມເຫຼື້ອມໃສໝັ້ນຄົງ ໃນພຣະສົງ ປະກອບດ້ວຍສິນທີ່ພຣະອະຣິຍະຮັກແພງ ຊ່າງໝໍ້ຊື່ຄະຕິກາຣະເປັນຜູ້ໝົດຄວາມສົງໄສໃນທຸກ ເປັນຜູ້ໝົດຄວາມສົງໄສໃນທຸກຂະສະມຸໄທ ເປັນຜູ້ໝົດຄວາມສົງໄສໃນທຸກຂະນິໂຣດ ເປັນຜູ້ໝົດຄວາມສົງໄສໃນທຸກຂະນິໂຣດຄາມິນີປະຕິປະທາ ບໍຣິໂພກພັດຣຄາບດຽວເປັນພົມມະຈາຣີ ມີສິນ ມີກັນລະຍານະທຳ ບໍ່ໃຊ້ແກ້ວມະນີແລະຄຳເປັນເຄື່ອງປະດັບ ປາສະຈາກການໃຊ້ຄຳແລະເງິນ

ມະຫາບໍພິດ ຊ່າງໝໍ້ຊື່ຄະຕິກາຣະ ບໍ່ໃຊ້ພລົ່ວແລະມີຂອງຕົນຂຸດແຜ່ນດິນ ຫາບແຕ່ດິນຮິມແຄມຝັ່ງທີ່ພັງຫຼືຂຸຍໜູມາໃຊ້ເຮັດເປັນພາຊະນະ ແລ້ວກ່າວແນວນີ້ວ່າ “ຜູ້ຕ້ອງການພາຊະນະສຳລັບໃສ່ເຂົ້າສານ ໃສ່ຖົ່ວຂຽວ ໃສ່ຖົ່ວດຳ ຂໍໃຫ້ນຳພາຊະນະທີ່ຕ້ອງການນັ້ນໄປເທີ້ນ” ຊ່າງໝໍ້ຊື່ຄະຕິກາຣະລ້ຽງເບິ່ງມານດາບິດາ ເຊິ່ງເປັນຄົນຕາບອດແລະແກ່ຊະຣາ (ຫລັງຈາກຕາຍແລ້ວ) ຊ່າງໝໍ້ຊື່ຄະຕິກາຣະຈະເປັນໂອປະປາຕິກະ ຍ້ອນໂອຣຳພາຄີຍະສັງໂຍດ ໕ ປະການສິ້ນໄປ ຈັກປະຣິນິບພານໃນພົບນັ້ນ ບໍ່ຕ້ອງກັບມາຈາກໂລກນັ້ນອີກ

[໔໗໙] ມະຫາບໍພິດ ສະໄໝໜຶ່ງ ອາດຕະມາພາບຢູ່ທີ່ນິຄົມຊື່ເວຄະລິງຄະນັ້ນເອງ ເມື່ອເວລາເຊົ້າ ອາດຕະມາພາບຄອງອັນຕະຣະວາສົກຖືບາດ ແລະ ຈີວອນ ເຂົ້າໄປຫາມານດາບິດາຂອງຊ່າງໝໍ້ຊື່ ຄະຕິກາຣະ ຮອດບ່ອນຢູ່ແລ້ວໄດ້ຖາມວ່າ “ເບິ່ງເທີ້ນ ນີ້ຄົນຫາອາຫານໄປຢູ່ໄສເສຍນໍ”

ມານດາບິດາຂອງຊ່າງໝໍ້ຊື່ຄະຕິກາຣະທູນຕອບວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ອຸປັດຖາກຂອງພຣະອົງອອກໄປແລ້ວ ຂໍພຣະອົງຈົ່ງຮັບເຂົ້າສຸກຈາກໝໍ້ເຂົ້າ ຮັບແກງຈາກໝໍ້ແກງສະເຫວີຍເທີ້ນ"

ຄັ້ງນັ້ນ ອາດຕະມາພາບໄດ້ຮັບເຂົ້າສຸກຈາກໝໍ້ເຂົ້າ ຮັບແກງຈາກໝໍ້ແກງສັນແລ້ວ ລຸກຈາກອາສະນະຈາກໄປ ລຳດັບນັ້ນ ຊ່າງໝໍ້ຊື່ຄະຕິກາຣະເຂົ້າໄປຫາມານດາບິດາຮອດບ່ອນຢູ່ແລ້ວໄດ້ຖາມວ່າ "ໃຜມາຮັບເຂົ້າສຸກຈາກໝໍ້ເຂົ້າ ຮັບແກງຈາກໝໍ້ແກງ ບໍຣິໂພກແລ້ວລຸກຈາກອາສະນະ ຈາກໄປ"

ມານດາບິດາບອກວ່າ "ລູກເອີຍ ພຣະຜູ້ມີພຣະພາກເຈົ້າຊົງພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຊົງຮັບເຂົ້າສຸກຈາກໝໍ້ເຂົ້າ ຮັບແກງຈາກໝໍ້ແກງສະເຫວີຍແລ້ວຊົງລຸກຈາກອາສະນະສະເດັດຈາກໄປ"

ມະຫາບໍພິດ ຄັ້ງນັ້ນ ຊ່າງໝໍ້ຊື່ຄະຕິກາຣະໄດ້ຄິດວ່າ "ເປັນລາບຂອງເຮົານໍ ເຮົາໄດ້ດີແລ້ວນໍ ທີ່ພຣະຜູ້ມີພຣະພາກເຈົ້າຊົງພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຊົງຄຸ້ນເຄີຍຢ່າງຍິ່ງແນວນີ້" ຄັ້ງນັ້ນ ປີຕິແລະສຸກບໍ່ຈາງຫາຍຈາກຊ່າງໝໍ້ ຊື່ຄະຕິກາຣະຕະຫຼອດເຄິ່ງເດືອນ ບໍ່ຈາງຫາຍຈາກມານດາບິດາຕະຫຼອດ ໗ ມື້

[໔໙໐] ມະຫາບໍພິດ ສະໄໝໜຶ່ງ ອາດຕະມາພາບຢູ່ທີ່ນິຄົມຊື່ເວຄະລິງຄະນັ້ນເອງ ເມື່ອເວ ລາເຊົ້າ ອາດຕະມາພາບຄອງອັນຕະຣະວາສົກຖືບາດແລະຈີວອນ ເຂົ້າໄປຫາມານດາບິດາຂອງ ຊ່າງໝໍ້ຊື່ຄະຕິກາຣະຮອດບ່ອນຢູ່ແລ້ວໄດ້ຖາມວ່າ "ເບິ່ງເທີ້ນ ຄົນຫາອາຫານໄປໄສເສຍແລ້ວນໍ"

ມານດາບິດາຂອງຊ່າງໝໍ້ຊື່ຄະຕິກາຣະທູນຕອບວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ອຸປັດຖາກຂອງພຣະອົງອອກໄປແລ້ວ ຂໍພຣະອົງຈົ່ງຮັບເຂົ້າໜົມກຸມມາດຈາກກະເຊົ້ານີ້ ຮັບແກງຈາກໝໍ້ແກງສະເຫວີຍເທີ້ນ"

ຄັ້ງນັ້ນ ອາດຕະມາພາບໄດ້ຮັບເຂົ້າໜົມກຸມມາດຈາກກະເຊົ້າ ຮັບແກງຈາກໝໍ້ແກງສັນແລ້ວ ລຸກຈາກອາສະນະຈາກໄປ ລຳດັບນັ້ນ ຊ່າງໝໍ້ຊື່ຄະຕິກາຣະ ເຂົ້າໄປຫາມານດາບິດາຮອດບ່ອນຢູ່ແລ້ວໄດ້ຖາມວ່າ "ໃຜມາຮັບເຂົ້າໜົມກຸມມາດຈາກກະເຊົ້າ ຮັບແກງຈາກໝໍ້ແກງ ບໍຣິໂພກແລ້ວ ລຸກຈາກອາສະນະຈາກໄປ"

ມານດາບິດາບອກວ່າ "ລູກເອີຍ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະ ອະຣະຫັນຕະສຳມາສຳພຸດທະເຈົ້າ ຊົງຮັບເຂົ້າໜົມກຸມມາດຈາກກະເຊົ້າ ຮັບແກງຈາກໝໍ້

ແກງສະເຫວີຍແລ້ວຊົງລຸກຈາກອາສະນະສະເດັດຈາກໄປແລ້ວ"

ມະຫາບໍພິດ ຄັ້ງນັ້ນ ຊ່າງໝໍ້ຊື່ຄະຕິກາຣະໄດ້ຄິດວ່າ "ເປັນລາບຂອງເຮົານໍ ເຮົາໄດ້ດີແລ້ວນໍ ທີ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຊົງຄຸ້ນເຄີຍຢ່າງຍິ່ງແນວນີ້" ຄັ້ງນັ້ນ ປີຕິແລະສຸກບໍ່ຈາງຫາຍຈາກຊ່າງໝໍ້ ຊື່ຄະຕິກາຣະຕະຫຼອດເຄິ່ງເດືອນ ບໍ່ຈາງຫາຍຈາກມານດາບິດາຕະຫຼອດ ໗ ມື້

[໔໙໑] ມະຫາບໍພິດ ສະໄໝໜຶ່ງ ອາດຕະມາພາບຢູ່ທີ່ນິຄົມຊື່ເວຄະລິງຄະນັ້ນເອງ ຂະນະນັ້ນ ກຸຕິຮົ່ວຈຶ່ງຮຽກພິກຂຸທັງຫລາຍມາກ່າວວ່າ "ພິກຂຸທັງຫລາຍ ທ່ານທັງຫລາຍຈົ່ງໄປເບິ່ງວ່າໃນເຮືອນ ຂອງຊ່າງໝໍ້ຊື່ຄະຕິກາຣະມີຫຍ້າບໍ?"

ເມື່ອອາດຕະມາພາບກ່າວແນວນີ້ແລ້ວ ພິກຂຸເຫຼົ່ານັ້ນ (ໄປເບິ່ງກັບມາແລ້ວ) ໄດ້ກ່າວກັບອາດຕະມາພາບວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທີ່ເຮືອນຂອງຊ່າງໝໍ້ຊື່ ຄະຕິກາຣະບໍ່ມີຫຍ້າ ມີແຕ່ຫຍ້າທີ່ມຸງຫລັງຄາເຮືອນຂອງເຂົາທີ່ນັ້ນ"

ອາດຕະມາພາບຈຶ່ງໄດ້ສັ່ງພິກຂຸທັງຫລາຍວ່າ "ພິກຂຸທັງຫລາຍ ທ່ານທັງຫລາຍຈົ່ງພາກັນໄປ ຮື້ຫຍ້າທີ່ມຸງຫລັງຄາເຮືອນຂອງຊ່າງໝໍ້ຊື່ ຄະຕິກາຣະ"

ພິກຂຸເຫຼົ່ານັ້ນ ໄດ້ໄປຮື້ຫຍ້າທີ່ມຸງຫລັງຄາເຮືອນຂອງຊ່າງໝໍ້ຊື່ ຄະຕິກາຣະ ຄັ້ງນັ້ນ ມານດາບິດາຂອງຊ່າງໝໍ້ຊື່ ຄະຕິກາຣະ ໄດ້ກ່າວກັບພິກຂຸເຫຼົ່ານັ້ນວ່າ "ຜູ້ໃດນໍ? ມາຮື້ຫຍ້າມຸງຫລັງຄາເຮືອນ"

ພິກຂຸທັງຫລາຍຕອບວ່າ "ຄຸນຂ້ານ້ອຍ ກຸຕິຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າຮົ່ວ"

ມານດາບິດາຂອງຊ່າງໝໍ້ຊື່ ຄະຕິກາຣະໄດ້ກ່າວວ່າ "ນຳໄປເທີ້ນຂ້ານ້ອຍ ນຳໄປໄດ້ຕາມຕ້ອງການເທີ້ນ ພຣະຜູ້ເປັນເຈົ້າ"

ຄັ້ງນັ້ນ ຊ່າງໝໍ້ຊື່ຄະຕິກາຣະເຂົ້າໄປຫາມານດາບິດາຮອດບ່ອນຢູ່ແລ້ວຖາມວ່າ "ຜູ້ໃດນໍ? ມາຮື້ຫຍ້າມຸງຫລັງຄາເຮືອນ"

ມານດາບິດາຕອບວ່າ "ລູກເອີຍ ພິກຂຸທັງຫລາຍບອກວ່າ "ກຸຕິຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກັດສະປະຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າຮົ່ວ"

ລຳດັບນັ້ນ ຊ່າງໝໍ້ຊື່ຄະຕິກາຣະໄດ້ຄິດວ່າ "ເປັນລາບຂອງເຮົານໍ ເຮົາໄດ້ດີແລ້ວນໍ ທີ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກັດສະປະ ຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ

ຊົງຄຸ້ນເຄີຍ ຢ່າງຍິ່ງແນວນີ້" ຄັ້ງນັ້ນ ປີຕິແລະສຸກບໍ່ຈາງຫາຍຈາກຊ່າງໝໍ້ຊື່ ຄະຕິກາຣະຕະຫຼອດ ເຄິ່ງເດືອນ ບໍ່ຈາງຫາຍຈາກມານດາບິດາຕະຫຼອດ ໗ ມື້

ມະຫາບໍພິດ ຄັ້ງນັ້ນ ເຮືອນທີ່ຊ່າງໝໍ້ຊື່ຄະຕິກາຣະອາໄສຢູ່ຫລັງນັ້ນ ມີອາກາດເປັນ ຫລັງຄາຢູ່ຕະຫຼອດ ໓ ເດືອນ ເຖິງຝົນຕົກກໍບໍ່ຮົ່ວ ຊ່າງໝໍ້ຊື່ຄະຕິກາຣະມີຄຸນແນວນີ້"

ພຣະເຈົ້າກາສີຊົງພຣະນາມວ່າກິກີຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເປັນລາບ ຂອງຊ່າງໝໍ້ຊື່ຄະຕິກາຣະນໍ ຊ່າງໝໍ້ຊື່ຄະຕິກາຣະໄດ້ດີແລ້ວນໍ ທີ່ພຣະຜູ້ມີພຣະພາກເຈົ້າຊົງຄຸ້ນ ເຄີຍຢ່າງຍິ່ງແນວນີ້"

[໔໘໔] ອານົນ ຄັ້ງນັ້ນ ພຣະເຈົ້າກາສີພຣະນາມວ່າ ກິກີ ຊົງໃຫ້ຣາຊະບຸຣຸດສົ່ງກວຽນ ບັນທຸກເຂົ້າສານ ເຂົ້າບັນຖຸມຸຖິກສາລີປະມານ ໕໐໐ ເຫຼັ້ມກວຽນ ແລະ ເຄື່ອງແກງ ພໍສົມຄວນ ກັບເຂົ້າສານນັ້ນ ໄປພຣະຣາດຊະທານແກ່ຊ່າງໝໍ້ຊື່ ຄະຕິກາຣະ ຣາຊະບຸຣຸດທັງຫລາຍ ເຂົ້າໄປ ຫາຊ່າງໝໍ້ຊື່ ຄະຕິກາຣະ ແລ້ວໄດ້ກ່າວວ່າ "ທ່ານຜູ້ຈະເລີນ ນີ້ເຂົ້າສານ ເຂົ້າບັນຖຸມຸຖິກສາລີ ປະມານ ໕໐໐ ເຫຼັ້ມກວຽນ ແລະ ເຄື່ອງແກງພໍສົມຄວນກັບເຂົ້າສານນັ້ນ ພຣະເຈົ້າ ກິກີກາສີຊົງ ສົ່ງມາພຣະຣາດຊະທານແກ່ທ່ານແລ້ວ ຈົ່ງຮັບຂອງພຣະຣາດຊະທານເຫຼົ່ານັ້ນໄວ້ເທີ້ນ"

ຊ່າງໝໍ້ຊື່ ຄະຕິກາຣະກ່າວວ່າ "ພຣະຣາຊາມີພຣະລາດຊະກິດຫຼາຍ ມີພຣະຣາຊະວຽກ ງານຫຼາຍ ສິ່ງຂອງທີ່ພຣະຣາດຊະທານມານີ້ຢ່າເປັນຂອງຂ້າພະເຈົ້າເລີຍ ຈົ່ງເປັນຂອງຫລວງ ເທີ້ນ"

ອານົນ ທ່ານຄົງຈະຄິດແນວນີ້ວ່າ "ສະໄໝນັ້ນ ໂຊຕິປາລະມານົບຄົງເປັນຄົນອື່ນເປັນແນ່ ແຕ່ທ່ານບໍ່ຄວນເຫັນແນວນັ້ນ ສະໄໝນັ້ນ ເຮົາກໍຄືໂຊຕິປາລະມານົບນັ້ນເອງ"

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພາສິດນີ້ແລ້ວ ທ່ານພຣະອານົນ ມີໃຈຍິນດີຊົມຊື່ນພຣະ ພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ຄະຕິກາຣະສູດທີ່ ໑ ຈົບ**

# ໘. ຣັດຖະປາລະສູດ

## ວ່າດ້ວຍພຣະຣັດຖະປາລະ

## ພາມແລະຄະຫະບໍດີຊາວເມືອງຖຸນລະໂກດຖິຕະເຂົ້າເຝົ້າ

[໔໙໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນກຸຣຸ ພ້ອມກັບພິກຂຸສົງໝູ່ໃຫຍ່ ສະເດັດເຖິງນິຄົມຂອງຊາວກຸຣຸຊື່ຖຸນລະໂກດຖິຕະ ພາມແລະຄະຫະບໍດີທັງຫລາຍຊາວຖຸນລະໂກດຖິຕະນິຄົມໄດ້ສະດັບຂ່າວ ວ່າ

"ໄດ້ຂ່າວວ່າ ພຣະສະມະນະໂຄດົມເປັນສາກະຍະບຸດສະເດັດອອກບວດຈາກສາກະຍະຕະກູນ ຊົງຈາຣິກໄປໃນແຄວ້ນກຸຣຸ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດເຖິງຖຸນລະໂກດຖິຕະນິຄົມ ທ່ານພຣະໂຄດົມພຣະອົງນັ້ນມີກິດຕິສັບອັນງາມຊ່າລືໄປແລ້ວແນວນີ້ວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາ ແລະ ຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາ ແລະ ມະນຸດທັງຫລາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ພຣະອົງຊົງຮູ້ແຈ້ງໂລກນີ້ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະ ມະນຸດດ້ວຍພຣະອົງເອງແລ້ວຈຶ່ງປະກາດໃຫ້ຜູ້ອື່ນຮູ້ຕາມ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ຊົງປະກາດພົມມະຈັນພ້ອມທັງອັດຖະ ແລະ ພະຍັນຊະນະບໍລິສຸດ ບໍລິບູນຄົບຖ້ວນ ການໄດ້ພົບພຣະອະຣະຫັນທັງຫລາຍແນວນີ້ ເປັນຄວາມດີຢ່າງແທ້ຈິງ"

ຄັ້ງນັ້ນ ພາມແລະຄະຫະບໍດີຊາວຖຸນລະໂກດຖິຕະນິຄົມ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ລາງພວກຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກ ທູນສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກປະນົມມືໄປທາງພຣະຜູ້ມີພຣະພາກເຈົ້າປະທັບນັ່ງແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ລາງພວກປະກາດຊື່ ແລະ ໂຄດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກກໍນັ່ງນິ່ງຢູ່ທີ່ທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພາມ ແລະ ຄະຫະບໍດີຊາວຖຸນລະໂກດຖິຕະ-ນິຄົມເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ

## ຣັດຖະປາລະກຸນລະບຸດຂໍບວດ

[໔໙໔] ສະໄໝນັ້ນ ກຸນລະບຸດຊື່ຣັດຖະປາລະ ເປັນບຸດຂອງຕະກູນຊັ້ນສູງໃນຖຸນລະໂກດຖິຕະນິຄົມນັ້ນ ນັ່ງຢູ່ໃນບໍລິສັດນັ້ນດ້ວຍ ຂະນະນັ້ນເອງ ຣັດຖະປາລະກຸນລະບຸດໄດ້ຄິດວ່າ "ທຳຕາມ ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງນັ້ນ ເຮົາເຂົ້າໃຈວ່າ ການທີ່ຜູ້ຢູ່ຄອງເຮືອນຈະປະພຶດ ພົມມະຈັນໃຫ້ບໍລິສຸດ ບໍລິບູນຄົບຖ້ວນ ຄືຫອຍສັງຂັດ ບໍ່ແມ່ນກະທຳໄດ້ງ່າຍ ທາງທີ່ດີເຮົາຄວນແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດເທີ້ນ"

ຄັ້ງນັ້ນ ພວກພາມແລະຄະຫະບໍດີຊາວຖຸນລະໂກດຖິຕະນິຄົມ ຜູ້ທີ່ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວຕ່າງຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ລຸກຈາກບ່ອນນັ່ງ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈາກໄປ ລຳດັບນັ້ນ ເມື່ອພາມແລະຄະຫະບໍດີຊາວຖຸນລະໂກດຖິຕະນິຄົມຈາກໄປບໍ່ດົນ ຣັດຖະປາລະກຸນລະບຸດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ພຣະອົງຜູ້ຈະເລີນ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງນັ້ນ ຂ້າພຣະອົງເຂົ້າໃຈວ່າ ການທີ່ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດ ບໍລິບູນຄົບຖ້ວນ ຄື ຫອຍສັງຂັດ ບໍ່ແມ່ນເຮັດໄດ້ງ່າຍ ຂ້າພຣະອົງປາຖະໜາຈະແຖຜົມແລະໜວດ ນຸ່ງຫົ່ມ ຜ້າກາສາວະພັດອອກຈາກເຮືອນບວດເປັນບັນພະຊິດ ຂໍຂ້າພຣະອົງເພິ່ງໄດ້ບັນພະຊາ ອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຣັດຖະປາລະ ມານດາບິດາອະນຸຍາດໃຫ້ທ່ານອອກຈາກເຮືອນບວດ ເປັນບັນພະຊິດແລ້ວບໍ?"

ຣັດຖະປາລະກຸນລະບຸດຂາບທູນວ່າ "ຍັງບໍ່ໄດ້ອະນຸຍາດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຣັດຖະປາລະ ພຣະຕະຖາຄົດທັງຫລາຍຍ່ອມບໍ່ບວດໃຫ້ກຸນລະບຸດທີ່ມານດາບິດາຍັງບໍ່ໄດ້ອະນຸຍາດ"

ຣັດຖະປາລະກຸນລະບຸດຂາບທູນວ່າ "ຂ້າພຣະອົງ ຈັກຫາວິທີໃຫ້ມານດາບິດາອະນຸຍາດໃຫ້ ຂ້າພຣະອົງອອກຈາກເຮືອນບວດເປັນບັນພະຊິດ ຂ້ານ້ອຍ"

[໔໙໕] ຄັ້ງນັ້ນ ຣັດຖະປາລະກຸນລະບຸດລຸກຈາກບ່ອນນັ່ງ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວເຂົ້າໄປຫາມານດາບິດາຮອດບ່ອນຢູ່ແລ້ວກ່າວວ່າ "ທ່ານພໍ່ຍາ

ແມ່ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງນັ້ນ ລູກເຂົ້າໃຈວ່າ ການທີ່ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດ ບໍລິບູນຄົບຖ້ວນ ຄືຫອຍສັງຂັດ ບໍ່ແມ່ນເຮັດໄດ້ງ່າຍ ລູກປາຖະໜາຈະແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ ຂໍທ່ານພໍ່ຍາແມ່ໂຜດອະນຸຍາດໃຫ້ລູກອອກຈາກເຮືອນບວດເປັນບັນພະຊິດເທີ້ນ"

ເມື່ອຣັດຖະປາລະກຸນລະບຸດກ່າວແນວນີ້ແລ້ວ ມານດາບິດາຂອງຣັດຖະປາລະກຸນລະບຸດໄດ້ກ່າວວ່າ "ຣັດຖະປາລະເອີຍ ເຈົ້າເປັນລູກຊາຍຄົນດຽວ ເປັນທີ່ຮັກເປັນທີ່ພໍໃຈຂອງພໍ່ແມ່ຈະເລີນເຕີບໂຕ ມາດ້ວຍຄວາມສຸກສະບາຍ ໄດ້ຮັບການລ້ຽງເບິ່ງມາຢ່າງດີ ລູກບໍ່ຮູ້ຈັກຄວາມທຸກແມ່ນແຕ່ໜ້ອຍ [ມາເທີ້ນ ຣັດຖະປາລະເອີຍ ລູກຈົ່ງບໍຣິໂພກ ຈົ່ງດື່ມ ຈົ່ງໃຫ້ເຂົາປົນນິບັດ ລູກເມື່ອກຳລັງບໍຣິໂພກ ກຳລັງດື່ມ ກຳລັງໃຫ້ເຂົາປົນນິບັດຢູ່ ຈົ່ງຍິນດີບໍຣິໂພກການໄປພ້ອມ ທຳບຸນໄປພ້ອມເທີ້ນ ພໍ່ແມ່ຈະບໍ່ອະນຸຍາດໃຫ້ລູກອອກຈາກເຮືອນບວດເປັນບັນພະຊິດ] ເຖິງລູກຈະຕາຍພໍ່ແມ່ກໍບໍ່ປາຖະໜາຈະຈາກລູກ ເປັນຫຍັງ ພໍ່ແມ່ຈັກອະນຸຍາດໃຫ້ລູກທີ່ຍັງມີຊີວິດຢູ່ອອກຈາກເຮືອນບວດເປັນບັນພະຊິດນໍ?"

ແມ່ນເທື່ອທີ ໔ ໗ລ໗

ແມ່ນເທື່ອທີ ໓ ຣັດຖະປາລະກຸນລະບຸດໄດ້ກ່າວວ່າ "ທ່ານພໍ່ຍາແມ່ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງນັ້ນ ລູກເຂົ້າໃຈວ່າ ການທີ່ບຸກຄົນຜູ້ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດ ບໍລິບູນຄົບຖ້ວນ ຄື ຫອຍສັງຂັດ ບໍ່ແມ່ນເຮັດໄດ້ງ່າຍ ລູກປາຖະໜາຈະແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ ຂໍທ່ານພໍ່ຍາແມ່ໂຜດອະນຸຍາດໃຫ້ລູກອອກຈາກເຮືອນບວດເປັນບັນພະຊິດເທີ້ນ"

ແມ່ນເທື່ອທີ ໓ ມານດາບິດາຂອງຣັດປາລະກຸນລະບຸດກໍໄດ້ກ່າວວ່າ "ຣັດຖະປາລະເອີຍ ເຈົ້າເປັນລູກຊາຍຄົນດຽວ ເປັນທີ່ຮັກເປັນທີ່ພໍໃຈຂອງພໍ່ແມ່ ຈະເລີນໃຫຍ່ຂຶ້ນມາມາດ້ວຍຄວາມສຸກສະບາຍ ໄດ້ຮັບການລ້ຽງເບິ່ງມາຢ່າງດີ ລູກບໍ່ຮູ້ຈັກຄວາມທຸກແມ່ນແຕ່ໜ້ອຍ ມາເທີ້ນ ຣັດຖະປາລະເອີຍ ລູກຈົ່ງບໍຣິໂພກ ຈົ່ງດື່ມ ຈົ່ງໃຫ້ເຂົາປົນນິບັດຢູ່ເທີ້ນ ລູກເມື່ອກຳລັງບໍຣິໂພກ ກຳລັງດື່ມກຳລັງ ໃຫ້ເຂົາປົນນິບັດຢູ່ ຈົ່ງຍິນດີບໍຣິໂພກການໄປພ້ອມ ທຳບຸນໄປພ້ອມເທີ້ນ ພໍ່ແມ່ຈະບໍ່ອະນຸຍາດໃຫ້ລູກອອກຈາກເຮືອນບວດເປັນບັນພະຊິດ] ເຖິງລູກຈະຕາຍ ພໍ່ແມ່ກໍບໍ່ປາຖະໜາຈະຈາກລູກ ເປັນຫຍັງ ພໍ່ແມ່ຈັກອະນຸຍາດໃຫ້ລູກທີ່ຍັງມີຊີວິດຢູ່ ອອກຈາກເຮືອນບວດເປັນບັນພະຊິດນໍ"

## ມານດາບິດາບໍ່ອະນຸຍາດໃຫ້ບວດ

[໔໙໖] ຄັ້ງນັ້ນ ຣັດຖະປາລະກຸນລະບຸດຄິດວ່າ "ມານດາບິດາບໍ່ອະນຸຍາດໃຫ້ເຮົາອອກ

ຈາກເຮືອນບວດເປັນບັນພະຊິດແນ່" ຈຶ່ງນອນເທິງພື້ນອັນບໍ່ມີເຄື່ອງປູລາດ ໃນບ່ອນນັ້ນເອງ ດ້ວຍຕັ້ງໃຈວ່າ "ເຮົາຈັກຕາຍ ຫຼື ຈັກໄດ້ບວດກໍທີ່ກົງນີ້ແຫຼະ" ເຂົາຈຶ່ງບໍ່ບໍຣິໂພກອາຫານ ຕັ້ງແຕ່ ໑ ຄາບ ໒ ຄາບ ໓ ຄາບ ໔ ຄາບ ໕ ຄາບ ໖ ຄາບ ຈົນເຖິງ ໗ ຄາບ

ຄັ້ງນັ້ນ ມານດາບິດາຂອງຣັດຖະປາລະກຸນລະບຸດໄດ້ກ່າວວ່າ "ຣັດຖະປາລະເອີຍ ເຈົ້າເປັນລູກຊາຍຄົນດຽວ ເປັນທີ່ຮັກເປັນທີ່ພໍໃຈຂອງພໍ່ແມ່ ຈະເລີນໃຫຍ່ຂຶ້ນມາມາດ້ວຍຄວາມສຸກສະບາຍ ໄດ້ຮັບການລ້ຽງເບິ່ງມາຢ່າງດີ ລູກບໍ່ຮູ້ຈັກຄວາມທຸກແມ່ນແຕ່ໜ້ອຍ ຈົ່ງລຸກຂຶ້ນເທີ້ນ ຣັດຖະປາລະເອີຍ ລູກຈົ່ງບໍຣິໂພກ ຈົ່ງດື່ມ ຈົ່ງໃຫ້ເຂົາປົນນິບັດຢູ່ເທີ້ນ ລູກເມື່ອກຳລັງບໍຣິໂພກ ກຳລັງດື່ມ ກຳລັງໃຫ້ເຂົາປົນນິບັດຢູ່ ຈົ່ງຍິນດີບໍຣິໂພກການໄປພ້ອມ ທຳບຸນໄປພ້ອມເທີ້ນ ພໍ່ແມ່ຈະບໍ່ອະນຸຍາດໃຫ້ລູກອອກຈາກເຮືອນບວດເປັນບັນພະຊິດ ເຖິງລູກຈະຕາຍ ພໍ່ແມ່ກໍບໍ່ປາຖະໜາ ຈະຈາກລູກ ເປັນຫຍັງ ພໍ່ແມ່ຈັກອະນຸຍາດໃຫ້ລູກເຊິ່ງມີຊີວິດຢູ່ອອກຈາກເຮືອນບວດເປັນບັນພະຊິດນໍ ຈົ່ງລຸກຂຶ້ນເທີ້ນ ຣັດຖະປາລະເອີຍ ລູກຈົ່ງບໍຣິໂພກ ຈົ່ງດື່ມ ຈົ່ງໃຫ້ເຂົາປົນນິບັດ ຢູ່ເທີ້ນ ລູກເມື່ອກຳລັງບໍຣິໂພກ ກຳລັງດື່ມ ກຳລັງໃຫ້ເຂົາປົນນິບັດຢູ່ ຈົ່ງຍິນດີບໍຣິໂພກການໄປພ້ອມ ທຳບຸນໄປພ້ອມເທີ້ນ ພໍ່ແມ່ຈະບໍ່ອະນຸຍາດໃຫ້ລູກອອກຈາກເຮືອນບວດເປັນບັນພະຊິດ ເຖິງລູກຈະຕາຍ ພໍ່ແມ່ກໍບໍ່ປາຖະໜາຈະຈາກລູກ ເປັນຫຍັງ ພໍ່ແມ່ຈັກອະນຸຍາດໃຫ້ລູກເຊິ່ງມີຊີວິດຢູ່ອອກຈາກເຮືອນບວດເປັນບັນພະຊິດນໍ?"

ເມື່ອມານດາບິດາກ່າວແນວນີ້ແລ້ວ ຣັດຖະປາລະກຸນລະບຸດກໍໄດ້ນິ່ງເສີຍ

ແມ່ນເທື່ອທີ ໒ ມານດາບິດາຂອງຣັດຖະປາລະກຸນລະບຸດກໍໄດ້ກ່າວວ່າ ຯລຯ

ແມ່ນເທື່ອທີ ໒ ຣັດຖະປາລະກຸນລະບຸດກໍໄດ້ນິ່ງເສີຍ

ແມ່ນເທື່ອທີ ໓ ມານດາບິດາຂອງຣັດຖະປາລະກຸນລະບຸດກໍໄດ້ກ່າວວ່າ "ຣັດຖະປາລະເອີຍ ເຈົ້າເປັນລູກຄົນດຽວ ເປັນທີ່ຮັກເປັນທີ່ພໍໃຈຂອງພໍ່ແມ່ ຈະເລີນໃຫຍ່ຂຶ້ນມາມາດ້ວຍຄວາມສຸກສະບາຍ ໄດ້ຮັບການລ້ຽງເບິ່ງມາຢ່າງດີ ຣັດຖະປາລະເອີຍ ລູກບໍ່ຮູ້ຈັກຄວາມທຸກແມ່ນແຕ່ໜ້ອຍ [ຈົ່ງລຸກຂຶ້ນເທີ້ນ ຣັດຖະປາລະເອີຍ ລູກຈົ່ງບໍຣິໂພກ ຈົ່ງດື່ມ ຈົ່ງໃຫ້ເຂົາປົນນິບັດຢູ່ເທີ້ນ ລູກເມື່ອກຳລັງບໍຣິໂພກ ກຳລັງດື່ມ ກຳລັງໃຫ້ເຂົາປົນນິບັດຢູ່ ຈົ່ງຍິນດີບໍຣິໂພກການໄປພ້ອມ ທຳບຸນໄປພ້ອມເທີ້ນ ພໍ່ແມ່ຈະບໍ່ອະນຸຍາດໃຫ້ລູກອອກຈາກເຮືອນບວດເປັນບັນພະຊິດ] ເຖິງລູກຈະຕາຍພໍ່ແມ່ກໍ ບໍ່ປາຖະໜາຈະຈາກລູກ ເປັນຫຍັງ ພໍ່ແມ່ຈັກອະນຸຍາດໃຫ້ລູກເຊິ່ງມີຊີວິດຢູ່ອອກຈາກເຮືອນບວດເປັນບັນພະຊິດນໍ ຈົ່ງລຸກຂຶ້ນ ຣັດຖະປາລະເອີຍ ລູກຈົ່ງບໍຣິໂພກ ຈົ່ງດື່ມ ຯລຯ ເຖິງລູກຈະຕາຍ ພໍ່ແມ່ກໍບໍ່ປາຖະໜາຈະຈາກລູກ ເປັນຫຍັງ ພໍ່ແມ່ຈັກອະນຸຍາດໃຫ້ລູກເຊິ່ງມີຊີວິດຢູ່ອອກຈາກເຮືອນບວດເປັນບັນພະຊິດນໍ"

ແມ່ນເທື່ອທີ ໓ ຣັດຖະປາລະກຸນລະບຸດກໍໄດ້ນິ່ງເສີຍ

## ເພື່ອນຊ່ອຍອ້ອນວອນຂໍອະນຸຍາດໃຫ້ບວດ

[໔໙] ຄັ້ງນັ້ນ ພວກເພື່ອນຂອງຣັດຖະປາລະກຸນລະບຸດພາກັນເຂົ້າໄປຫາຣັດຖະປາລະກຸນລະບຸດ ຮອດບ່ອນຢູ່ແລ້ວໄດ້ກ່າວວ່າ

"ຣັດຖະປາລະເພື່ອນຮັກ ເພື່ອນເປັນລູກຊາຍຄົນດຽວ ເປັນທີ່ຮັກເປັນທີ່ພໍໃຈຂອງພໍ່ແມ່ ຈະເລີນໃຫຍ່ຂຶ້ນມາມາດ້ວຍຄວາມສຸກສະບາຍ ໄດ້ຮັບການລ້ຽງເບິ່ງມາຢ່າງດີ ເພື່ອນບໍ່ຮູ້ຈັກຄວາມທຸກແມ່ນແຕ່ໜ້ອຍເລີຍ ລຸກຂຶ້ນເທີ້ນ ຣັດຖະປາລະເພື່ອນຮັກ ເພື່ອນຈົ່ງບໍຣິໂພກ ຈົ່ງດື່ມ ຈົ່ງໃຫ້ເຂົາປົນນິບັດຢູ່ເທີ້ນ ເມື່ອກຳລັງບໍຣິໂພກ ກຳລັງດື່ມ ກຳລັງໃຫ້ເຂົາປົນນິບັດຢູ່ ຈົ່ງຍິນດີບໍຣິໂພກການໄປພ້ອມ ທຳບຸນໄປພ້ອມເທີ້ນ ພໍ່ແມ່ຈະບໍ່ອະນຸຍາດໃຫ້ເພື່ອນອອກຈາກເຮືອນບວດເປັນບັນພະຊິດ] ເຖິງເພື່ອນຈະຕາຍພໍ່ແມ່ກໍບໍ່ປາຖະໜາຈະຈາກເພື່ອນ ເປັນຫຍັງ ພໍ່ແມ່ຈັກຍອມອະນຸ ຍາດໃຫ້ເພື່ອນຜູ້ຍັງມີຊີວິດຢູ່ອອກຈາກເຮືອນບວດເປັນບັນພະຊິດນໍ ລຸກຂຶ້ນເທີ້ນ ຣັດຖະປາລະເພື່ອນຮັກ ເພື່ອນຈົ່ງບໍຣິໂພກ ຈົ່ງດື່ມ ຈົ່ງໃຫ້ເຂົາປົນນິບັດຢູ່ເທີ້ນ ເມື່ອກຳລັງບໍຣິໂພກ ກຳລັງດື່ມ ກຳລັງໃຫ້ເຂົາປົນນິບັດຢູ່ ຈົ່ງຍິນດີບໍຣິໂພກການໄປພ້ອມ ທຳບຸນໄປພ້ອມເທີ້ນ ພໍ່ແມ່ຈະບໍ່ອະນຸ ຍາດໃຫ້ເພື່ອນອອກຈາກເຮືອນບວດເປັນບັນພະຊິດແນ່ ເຖິງເພື່ອນຈະຕາຍ ພໍ່ແມ່ກໍບໍ່ປາຖະໜາຈະຈາກເພື່ອນ ເປັນຫຍັງ ພໍ່ແມ່ຈັກອະນຸຍາດໃຫ້ເພື່ອນເຊິ່ງມີຊີວິດຢູ່ ອອກຈາກເຮືອນບວດເປັນບັນພະຊິດນໍ ລຸກຂຶ້ນເທີ້ນ ຣັດຖະປາລະເພື່ອນຮັກ ເພື່ອນຈົ່ງບໍຣິໂພກ ຈົ່ງດື່ມ ຈົ່ງໃຫ້ເຂົາປົນນິບັດຢູ່ເທີ້ນ ເມື່ອກຳລັງບໍຣິໂພກ ກຳລັງດື່ມ ກຳລັງໃຫ້ເຂົາປົນນິບັດຢູ່ ຈົ່ງຍິນດີບໍຣິໂພກການໄປພ້ອມທຳບຸນໄປພ້ອມເທີ້ນ ພໍ່ແມ່ຈະບໍ່ອະນຸຍາດໃຫ້ເພື່ອນອອກຈາກເຮືອນບວດເປັນບັນພະຊິດ ເຖິງເພື່ອນຈະຕາຍ ພໍ່ແມ່ກໍບໍ່ປາຖະໜາຈະຈາກເພື່ອນ ເປັນຫຍັງພໍ່ແມ່ຈັກອະນຸຍາດໃຫ້ເພື່ອນທີ່ຍັງມີຊີວິດອອກຈາກເຮືອນບວດເປັນບັນພະຊິດນໍ?"

ເມື່ອສະຫາຍເຫຼົ່ານັ້ນກ່າວແນວນີ້ແລ້ວ ຣັດຖະປາລະກຸນລະບຸດກໍໄດ້ນິ່ງເສີຍ

ແມ່ນເທື່ອທີ ໔ ໗ລ໗

ແມ່ນເທື່ອທີ ໓ ພວກເພື່ອນຂອງຣັດຖະປາລະກຸນລະບຸດໄດ້ກ່າວວ່າ "ຣັດຖະປາລະເພື່ອນຮັກ ເພື່ອນເປັນລູກຊາຍຄົນດຽວ ເປັນທີ່ຮັກເປັນທີ່ພໍໃຈຂອງພໍ່ແມ່ ຈະເລີນໃຫຍ່ຂຶ້ນມາມາດ້ວຍຄວາມສຸກສະບາຍ ໄດ້ຮັບການລ້ຽງເບິ່ງມາຢ່າງດີ ເພື່ອນບໍ່ຮູ້ຈັກຄວາມທຸກແມ່ນແຕ່ໜ້ອຍເລີຍ ລຸກຂຶ້ນເທີ້ນ ຣັດຖະປາລະເພື່ອນຮັກ ເພື່ອນຈົ່ງບໍຣິໂພກ ຈົ່ງດື່ມ ຈົ່ງໃຫ້ເຂົາປົນນິບັດຢູ່ເທີ້ນ ເມື່ອກຳລັງບໍຣິໂພກ ກຳລັງດື່ມ ກຳລັງໃຫ້ເຂົາປົນນິບັດຢູ່ ຈົ່ງຍິນດີບໍຣິໂພກການໄປພ້ອມ ທຳບຸນໄປພ້ອມເທີ້ນ ພໍ່ແມ່ຈະບໍ່ອະນຸຍາດໃຫ້ເພື່ອນອອກຈາກເຮືອນບວດເປັນບັນພະຊິດ ເຖິງເພື່ອນຈະ

ຕາຍ ພໍ່ແມ່ກໍບໍ່ປາຖະໜາຈະຈາກເພື່ອນ ເປັນຫຍັງ ພໍ່ແມ່ເຫຼົ່ານັ້ນຈັກອະນຸຍາດ ໃຫ້ເພື່ອນເຊິ່ງມີຊີວິດຢູ່ ອອກຈາກເຮືອນບວດເປັນບັນພະຊິດບໍ ລຸກຂຶ້ນເທີ້ນ ຣັດຖະປາລະ ເພື່ອນຮັກ ເພື່ອນຈົ່ງບໍຣິໂພກ ຈົ່ງດື່ມ ຯລຯ ເຖິງເພື່ອນຈະຕາຍ ພໍ່ແມ່ກໍບໍ່ປາຖະໜາຈະຈາກເພື່ອນ ເປັນຫຍັງ ພໍ່ແມ່ເຫຼົ່ານັ້ນຈັກອະນຸຍາດໃຫ້ເພື່ອນເຊິ່ງມີຊີວິດຢູ່ອອກຈາກເຮືອນບວດເປັນບັນພະຊິດບໍ?"

ແມ່ນເທື່ອທີ ໓ ຣັດຖະປາລະກຸນລະບຸດກໍນິ່ງເສີຍ

[໔໙໗] ລຳດັບນັ້ນ ພວກເພື່ອນຂອງຣັດຖະປາລະກຸນລະບຸດພາກັນເຂົ້າໄປຫາມານດາບິດາຂອງຣັດຖະປາລະກຸນລະບຸດຮອດບ່ອນຢູ່ແລ້ວກ່າວວ່າ "ທ່ານພໍ່ຍາແມ່ ຣັດຖະປາລະກຸນລະບຸດນີ້ ນອນເທິງພື້ນທີ່ບໍ່ມີເຄື່ອງປູລາດ ໃນບ່ອນນັ້ນເອງດ້ວຍຕັ້ງໃຈວ່າ "ເຮົາຈັກຕາຍ ຫຼື ຈັກໄດ້ບວດກໍທີ່ກົງນີ້ແຫຼະ" ຖ້າທ່ານພໍ່ຍາແມ່ບໍ່ຍອມໃຫ້ຣັດຖະປາລະກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດ ເຂົາຈັກຕາຍ ໃນທີ່ກົງນັ້ນແນ່ ແຕ່ຖ້າທ່ານພໍ່ຍາແມ່ອະນຸຍາດໃຫ້ຣັດຖະປາລະກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດ ທ່ານພໍ່ຍາແມ່ກໍໄດ້ເຫັນເຂົາແມ່ນບວດແລ້ວຫາກຣັດຖະປາລະກຸນລະບຸດຈັກບໍ່ຍິນດີໃນການອອກຈາກເຮືອນບວດເປັນບັນພະຊິດ ເຂົາຈະມີທາງໄປຢູ່ໄສອື່ນບໍ ກໍຈັກກັບມາທີ່ເຮືອນນີ້ນັ້ນເອງ ຂໍທ່ານພໍ່ຍາແມ່ຈົ່ງອະນຸຍາດໃຫ້ຣັດຖະປາລະກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດເທີ້ນ"

ມານດາບິດາກ່າວວ່າ "ລູກທັງຫລາຍ ພໍ່ແມ່ອະນຸຍາດໃຫ້ຣັດຖະປາລະກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດໄດ້ໆ ແຕ່ເຂົາບວດແລ້ວຕ້ອງມາຢ້ຽມພໍ່ແມ່ແດ່"

ຕໍ່ມາ ພວກເພື່ອນພາກັນເຂົ້າໄປຫາຣັດຖະປາລະກຸນລະບຸດຮອດບ່ອນຢູ່ແລ້ວໄດ້ກ່າວວ່າ "ເຊີນລຸກຂຶ້ນເທີ້ນ ຣັດຖະປາລະເພື່ອນຮັກ ທ່ານພໍ່ຍາແມ່ອະນຸຍາດໃຫ້ເພື່ອນອອກຈາກເຮືອນບວດເປັນບັນພະຊິດແລ້ວ ແຕ່ເພື່ອນບວດແລ້ວຕ້ອງມາຢ້ຽມທ່ານພໍ່ຍາແມ່ຂອງເພື່ອນແດ່"

## ຣັດຖະປາລະກຸນລະບຸດບວດແລະບັນລຸພຣະອະຣະຫັຕ

[໔໙໙] ຄັ້ງນັ້ນ ຣັດຖະປາລະກຸນລະບຸດລຸກຂຶ້ນບຳລຸງຮ່າງກາຍໃຫ້ເກີດກຳລັງແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ມານດາບິດາອະນຸຍາດໃຫ້ຂ້າພຣະອົງອອກຈາກເຮືອນບວດເປັນບັນພະຊິດແລ້ວ ຂໍພຣະຜູ້ມີພຣະພາກເຈົ້າຊົງໃຫ້ຂ້າພຣະອົງບວດເທີ້ນ"

ຣັດຖະປາລະກຸນລະບຸດໄດ້ບັນພະຊາອຸປະສົມບົດແລ້ວ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ຄັ້ງນັ້ນ ເມື່ອທ່ານຣັດຖະປາລະອຸປະສົມບົດແລ້ວບໍ່ດົນ ພໍໄດ້ເຄິ່ງເດືອນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນຖຸນລະໂກດຖິຕະນິຄົມຕາມຄວາມຍິນດີ ສະເດັດຈາຣິກໄປທາງນະຄອນສາ

ວັດຖີ ສະເດັດທ່ຽວຈາຣິກໄປຕາມລຳດັບຈົນເຖິງນະຄອນສາວັດຖີ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະຣັດຖະປາລະຫລີກອອກໄປຢູ່ຮູບດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດກໍເຮັດໃຫ້ແຈ້ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ເປັນອັນວ່າ ທ່ານພຣະຣັດຖະປາລະ ໄດ້ເປັນພຣະອະຣະຫັນອີກອົງໜຶ່ງໃນບັນດາພຣະອະຣະຫັນທັງຫລາຍ ດ້ວຍອາການຢ່າງນີ້

ຄັ້ງນັ້ນ ທ່ານພຣະຣັດຖະປາລະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງ ປາຖະໜາຈະໄປຢ້ຽມມານດາບິດາ ຖ້າພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຂ້າພຣະອົງ"

ພຣະຜູ້ມີພຣະພາກເຈົ້າຊົງ ມະນະສິການກຳນົດໃຈຂອງທ່ານພຣະຣັດຖະປາລະດ້ວຍພຣະຣິທັຍແລ້ວ ຊົງຮູ້ຊັດແຈ້ງວ່າ "ຣັດຖະປາລະກຸນລະບຸດ ບໍ່ສາມາດທີ່ຈະບອກລາສິກຂາກັບມາເປັນຄະຫຼືຫັດອີກໄດ້ເລີຍ"

ລຳດັບນັ້ນ ພຣະອົງຈຶ່ງຈຶ່ງຕັດວ່າ "ຣັດຖະປາລະ ທ່ານຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

ຕໍ່ຈາກນັ້ນ ທ່ານພຣະຣັດຖະປາລະລຸກຈາກອາສະນະຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ທຳປະທັກຂິນແລ້ວຖືຮັກສາເສນາສະນະຖືບາດ ແລະ ຈີວອນຈາຣິກໄປທາງຖຸນລະໂກດຖິຕະນິຄົມ ທ່ຽວຈາຣິກ ໄປຕາມລຳດັບຈົນເຖິງຖຸນລະໂກດຖິຕະນິຄົມແລ້ວ ໄດ້ຂ່າວວ່າ ທ່ານພຣະຣັດຖະປາລະພັກຢູ່ທີ່ພຣະຣາຊະອຸທະຍານຊື່ ມິຄະຈີຣະ ຂອງພຣະເຈົ້າໂກຣັບພະຍະໃນຖຸນລະໂກດຖິຕະນິຄົມນັ້ນ ເມື່ອເວລາເຊົ້າ ທ່ານພຣະຣັດຖະປາລະຄອງອັນຕະຣະວາສົກຖືບາດ ແລະຈີວອນເຂົ້າໄປບິນທະບາດຍັງຖຸນລະໂກດຖິຕະນິຄົມ ຂະນະທ່ຽວບິນທະບາດໃນຖຸນລະໂກດຖິຕະນິຄົມຕາມລຳດັບຮ່ອມ ໄດ້ເຂົ້າໄປຈົນເຖິງນິເວດຂອງບິດາຂອງຕົນ

ເວລານັ້ນ ບິດາຂອງທ່ານພຣະຣັດຖະປາລະກຳລັງໃຫ້ຊ່າງຕັດຜົມ ສາງຜົມຢູ່ທີ່ຊຸ້ມປະຕູກລາງ ໄດ້ເຫັນທ່ານພຣະຣັດຖະປາລະກຳລັງມາແຕ່ໄກແລ້ວໄດ້ກ່າວວ່າ "ພວກສະມະນະໂລ້ນເຫລົ່ານີ້ ບວດລູກຊາຍຄົນດຽວຜູ້ເປັນທີ່ຮັກເປັນທີ່ພໍໃຈຂອງເຮົາ"

ຄັ້ງນັ້ນ ທ່ານພຣະຣັດຖະປາລະບໍ່ໄດ້ຮັບທານ ບໍ່ໄດ້ຮັບຄຳຕອບທີ່ເຮືອນບິດາຂອງທ່ານເອງ ແທ້ທີ່ຈິງໄດ້ແຕ່ຄຳດ່າທໍ່ນັ້ນ ສະໄໝນັ້ນ ຂ້າທາດຍິງຂອງຍາດຂອງທ່ານພຣະຣັດຖະປາລະ

ກໍາລັງ ຈະຖິ້ມເຂົ້າໜົມກຸມມາດແຮມຄືນ ທ່ານພຣະຣັດຖະປາລະໄດ້ກ່າວກັບຂ້າທາດຍິງຂອງ ຍາດນັ້ນວ່າ "ນາງ ຖ້າຈະຖິ້ມສິ່ງນັ້ນ ກໍຈົ່ງໃສ່ໃນບາດຂອງອາດຕະມານີ້ເທີ້ນ"

ຂະນະທີ່ຂ້າທາດຍິງຂອງຍາດຂອງທ່ານກໍາລັງເທຂເຂົ້າໜົມກຸມມາດແຮມຄືນນັ້ນລົງໃນ ບາດ ກໍຈື່ເຄົ້າມື ຕີນ ແລະ ນໍ້າສຽງຂອງທ່ານພຣະຣັດຖະປາລະໄດ້

## ພຣະຣັດຖະປາລະສັນເຂົ້າໜົມບູດ

[໓໐໐] ຄັ້ງນັ້ນ ຂ້າທາດຍິງຂອງຍາດຂອງທ່ານພຣະຣັດຖະປາລະໄດ້ເຂົ້າໄປຫາມານດາ ຂອງທ່ານພຣະຣັດຖະປາລະຮອດບ່ອນຢູ່ແລ້ວໄດ້ກ່າວວ່າ "ຍາແມ່ ຂ້ານ້ອຍ ໂຜດຮູ້ເທີ້ນວ່າ "ພຣະຣັດຖະປາລະບຸດຂອງຍາແມ່ກັບມາແລ້ວ"

ມານດາຂອງທ່ານພຣະຣັດຖະປາລະກ່າວວ່າ "ນາງເອີຍ ຖ້າທ່ານເວົ້າຈິງ ເຮົາຈະປົດ ປ່ອຍ ທ່ານໃຫ້ເປັນໄທ" ມານດາຂອງທ່ານພຣະຣັດຖະປາລະ ເຂົ້າໄປຫາບິດາຂອງທ່ານພຣະ ຣັດຖະປາລະຮອດບ່ອນຢູ່ແລ້ວໄດ້ກ່າວວ່າ "ເດຊະບຸນ ທ່ານຄະຫະບໍດີ ທ່ານຮູ້ບໍ່ ໄດ້ຂ່າວວ່າ ຣັດຖະປາລະກຸນລະບຸດ ກັບມາແລ້ວ"

ເວລານັ້ນ ທ່ານພຣະຣັດຖະປາລະນັ່ງອີງຝາເຮືອນແຫ່ງໜຶ່ງ ສັນເຂົ້າໜົມກຸມມາດແຮມ ຄືນ ຂ້ານ້ອຍບິດາເຂົ້າໄປຫາທ່ານພຣະຣັດຖະປາລະຮອດບ່ອນຢູ່ແລ້ວໄດ້ຖາມວ່າ "ເປັນຫຍັງນໍ? ຣັດຖະປາລະເອີຍ ລູກຄືມາສັນເຂົ້າໜົມກຸມມາດຄ້າງຄືນແນວນີ້ນໍ? ລູກຄວນກັບໄປເຮືອນຂອງ ຕົນ ບໍ່ແມ່ນບໍ?"

ທ່ານພຣະຣັດຖະປາລະຕອບວ່າ "ຄະຫະບໍດີ ອາດຕະມາພາບຜູ້ອອກຈາກເຮືອນບວດ ເປັນບັນພະຊິດຈະມີເຮືອນແຕ່ຢູ່ໃສ ອາດຕະມາພາບບໍ່ມີເຮືອນ ອາດຕະມາພາບໄດ້ໄປເຮືອນ ຂອງທ່ານມາແລ້ວ ໃນເຮືອນນັ້ນ ອາດຕະມາພາບບໍ່ໄດ້ຮັບທານ ບໍ່ໄດ້ຮັບຄໍາຕອບເລີຍ ໄດ້ແຕ່ ຄໍາດ່າແນວດຽວ"

ບິດາກ່າວວ່າ "ມາເທີ້ນ ລູກຣັດຖະປາລະ ພວກເຮົາຈະໄປເຮືອນນໍາກັນ"

ທ່ານພຣະຣັດຖະປາລະກ່າວວ່າ "ຢ່າເລີຍ ຄະຫະບໍດີ ມື້ນີ້ອາດຕະມາພາບສັນອີ່ມແລ້ວ"

ບິດາກ່າວວ່າ "ຣັດຖະປາລະເອີຍ ຖ້າເຊັ່ນນັ້ນ ຂໍທ່ານຈົ່ງຮັບນິມົນສັນພັດຕາຫານໃນມື້ ອື່ນນີ້ດ້ວຍເທີ້ນ"

ທ່ານພຣະຣັດຖະປາລະຮັບນິມົນໂດຍດຸດສະນີພາບແລ້ວ ລໍາດັບນັ້ນ ບິດາຂອງທ່ານ ພຣະຣັດຖະປາລະຮູ້ອາການທີ່ທ່ານພຣະຣັດຖະປາລະຮັບນິມົນແລ້ວ ຈຶ່ງເຂົ້າໄປສູ່ນິເວດຂອງຕົນ

ແລ້ວໃຫ້ຂົນເງິນ ແລະ ຄຳຫຼາຍອົງເປັນກອງໃຫຍ່ ໃຫ້ເອົາສາດອັດໄວ້ ແລ້ວຮຽກພັນລະຍາເກົ່າຂອງທ່ານພຣະຣັດຖະປາລະມາກ່າວວ່າ "ມາເທີ້ນແມ່ສາວ ໆ ທັງຫລາຍ ພວກເຈົ້າ ເຄີຍແຕ່ງໂຕດ້ວຍເຄື່ອງປະດັບຊຸດໃດແລ້ວ ຈຶ່ງເປັນທີ່ຮັກເປັນທີ່ພໍໃຈຂອງຣັດຖະປາລະກຸນລະບຸດ ເມື່ອຄາວກ່ອນ ຈົ່ງແຕ່ງໂຕດ້ວຍເຄື່ອງປະດັບຊຸດນັ້ນເທີ້ນ"

[໓໐໑] ຄັ້ງນັ້ນ ເມື່ອຜ່ານຄືນນັ້ນໄປ ບິດາຂອງທ່ານພຣະຣັດຖະປາລະໄດ້ສັ່ງໃຫ້ຕົກແຕ່ງຂອງຫຍໍ້າຂອງຂ້ອຍແນວປະນີດໄວ້ໃນນິເວດຂອງຕົນ ແລ້ວໃຊ້ຄົນໄປບອກເວລາ ແກ່ທ່ານພຣະຣັດຖະປາລະວ່າ "ທ່ານຣັດຖະປາລະໄດ້ເວລາແລ້ວ ພັດຕາຫານສຳເລັດແລ້ວ"

ເມື່ອເວລາເຊົ້າ ທ່ານພຣະຣັດຖະປາລະຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ນິເວດຂອງບິດາທ່ານເອງແລ້ວນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ ບິດາຂອງທ່ານພຣະຣັດຖະປາລະ ສັ່ງໃຫ້ເປີດກອງເງິນກອງຄຳນັ້ນ ແລ້ວໄດ້ກ່າວກັບທ່ານພຣະຣັດຖະປາລະ ວ່າ

"ຣັດຖະປາລະເອີຍ ຊັບກອງນີ້ເປັນສ່ວນຂອງແມ່ ກອງນັ້ນເປັນສ່ວນຂອງພໍ່ສ່ວນອີກກອງໜຶ່ງເປັນຂອງບັນພະບຸລຸດ ທັງໝົດນີ້ເປັນຂອງລູກຜູ້ດຽວ ລູກສາມາດທີ່ຈະໃຊ້ສອຍສົມບັດໄປແລະທຳບຸນໄປກໍໄດ້ ມາເທີ້ນ ຣັດຖະປາລະເອີຍ ລູກຈົ່ງລາສິກຂາອອກມາເປັນຄະຫຼືຫັດໃຊ້ສອຍສົມບັດແລະທຳບຸນໄປເທີ້ນ"

ທ່ານພຣະຣັດຖະປາລະຕອບວ່າ "ຄະຫະບໍດີ ຖ້າທ່ານເພິ່ງເຮັດຕາມຄຳຂອງອາດຕະມາພາບໄດ້ ທ່ານເພິ່ງໃຫ້ຄົນຂົນກອງເງິນກອງຄຳນີ້ ໃສ່ກວຽນແລ້ວໃຫ້ເຂົາແກ່ໄປຖິ້ມໄວ້ທີ່ກາງກະແສແມ່ນ້ຳຄົງຄາເທີ້ນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມໄຫ້ຈົ່ມ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະອຸປາຍາດ (ຄວາມຄັບແຄ້ນໃຈ) ມີຊັບນັ້ນເປັນເຫດ ຈັກເກີດຂຶ້ນແກ່ທ່ານ"

ລຳດັບນັ້ນ ພວກພັນລະຍາເກົ່າຂອງທ່ານພຣະຣັດຖະປາລະ ຈັບຕີນຄົນລະຂ້າງແລ້ວໄດ້ຖາມທ່ານພຣະຣັດຖະປາລະວ່າ "ອັນຍາເອີຍ ນາງອັບປະສອນພວກໃດນໍ ເປັນຕົ້ນເຫດໃຫ້ອັນຍາປະພຶດພົມມະຈັນ"

ພຣະຣັດຖະປາລະຕອບວ່າ "ນ້ອງສາວເອີຍ ເຮົາບໍ່ໄດ້ປະພຶດພົມມະຈັນ ຍ້ອນເຫດແຫ່ງນາງອັບປະສອນທັງຫລາຍດອກ"

ພັນລະຍາເຫຼົ່ານັ້ນສາໃຈວ່າ "ຣັດຖະປາລະຜູ້ລູກເຈົ້າຮຽກພວກເຮົາວ່າ "ນ້ອງສາວ" ຈຶ່ງລົ້ມສະຫລົບຢູ່ບ່ອນນັ້ນ ຄັ້ງນັ້ນ ທ່ານພຣະຣັດຖະປາລະໄດ້ກ່າວກັບບິດາວ່າ "ຄະຫະບໍດີ ຖ້າທ່ານຈະຖວາຍອາຫານກໍຈົ່ງຖວາຍເທີ້ນ ຢ່າໃຫ້ອາດຕະມາພາບລຳບາກໃຈຢູ່ເລີຍ"

ບິດາກ່າວວ່າ "ສັນເທີ້ນ ຣັດຖະປາລະ ພັດຕາຫານສໍາເລັດແລ້ວ"

ຕໍ່ຈາກນັ້ນ ບິດາຂອງທ່ານພຣະຣັດຖະປາລະໄດ້ອັງຄາດທ່ານພຣະຣັດປາລະດ້ວຍຂອງຫຍໍ້າ ຂອງສັນອັນປະນີດ ຖວາຍໃຫ້ສັນຈົນອີ່ມໜໍາດ້ວຍມືຂອງຕົນ

## ພຣະຣັດຖະປາລະສະແດງທໍາ

[໓໐໔] ຄັ້ງນັ້ນ ເມື່ອທ່ານພຣະຣັດຖະປາລະສັນສໍາເລັດແລ້ວ ເອົາມືອອກຈາກບາດແລ້ວໄດ້ຢືນກ່າວຄາຖາເຫລົ່ານີ້ຂຶ້ນວ່າ

"ດູຣາ ທ່ານ ຈົ່ງເບິ່ງອັດພາບອັນວິຈິດ ມີກາຍເປັນແຜ
ທີ່ຄຸມກັນຢູ່ ກະສັບກະສ່າຍ
ເປັນທີ່ດໍາຣິຂອງຊົນເປັນຈໍານວນຫລາຍ ບໍ່ມີຄວາມໝັ້ນຍືນໝັ້ນຄົງ
ທ່ານ ຈົ່ງເບິ່ງຮູບອັນວິຈິດດ້ວຍແກ້ວມະນີແລະກຸນທົນ
ມີກະດູກອັນໜັງຫຸ້ມຫໍ່ໄວ້ ງາມດ້ວຍຜ້າ
ຕີນທີ່ຍ້ອມດ້ວຍຄັ່ງສີສົດ ໜ້າທີ່ລູບທາດ້ວຍຈຸນ
ພໍຈະຫລອກຄົນໂງ່ໃຫ້ຫຼົງໄຫຼໄດ້
ແຕ່ຈະຫລອກຄົນຜູ້ສະແຫວງຫາຝັ່ງ (ຄືນິບພານ) ບໍ່ໄດ້
ຜົມທີ່ຕົບແຕ່ງເປັນລອນດັ່ງຕາໝາກຣຸກ
ຕາທີ່ຫວານຫຍົດດ້ວຍຢາຍອດ ພໍຈະຫລອກຄົນໂງ່ໄດ້
ແຕ່ຈະຫລອກຄົນທີ່ສະແຫວງຫາຝັ່ງບໍ່ໄດ້
ກາຍທີ່ເນົ່າເປັນທໍາມະດາ ກາຍທີ່ມິດພາບເປື່ອຍເນົ່າເປັນທໍາມະດາ
ເຊິ່ງຕົກແຕ່ງແລ້ວຄືກ່ອງຢາຍອດຕາໃໝ່
ອັນງົດງາມພໍຈະຫລອກຄົນໂງ່ໄດ້
ແຕ່ຈະຫລອກຄົນຜູ້ສະແຫວງຫາຝັ່ງບໍ່ໄດ້
ທ່ານເປັນດັ່ງນາຍພານເນື້ອວາງບ້ວງໄວ້
ແຕ່ຊີ້ນບໍ່ຕິດບ້ວງ
ເມື່ອນາຍພານເນື້ອກໍາລັງໄຫ້ຈົ່ມຢູ່
ເຮົາກິນເຫຍື່ອແລ້ວກໍໜີໄປ"

ລໍາດັບນັ້ນ ທ່ານພຣະຣັດຖະປາລະຢືນກ່າວຄາຖາເຫລົ່ານີ້ແລ້ວ ຈຶ່ງເຂົ້າໄປສູ່ພຣະຣາຊະອຸທະຍານມິຄະຈີຣະຂອງພຣະເຈົ້າໂກຣັບພະຍະ ແລ້ວນັ່ງພັກກາງເວັນຢູ່ທີ່ເຫງົ້າໄມ້ແຫ່ງໜຶ່ງ

[໓໐໕] ຄັ້ງນັ້ນ ພຣະເຈົ້າໂກຣັບຍະຣັບສັ່ງຮຽກນາຍມິຄະວະນາຕັດວ່າ "ມິຄະວະເພື່ອນ

ຮັກ ທ່ານຈົ່ງທຳຄວາມສະອາດພື້ນທີ່ອຸທະຍານມິຄະຈີຣະ ເຮົາຈະໄປຊົມພື້ນທີ່ອຸທະຍານທີ່ສະອາດ”

ນາຍມິຄະວະທູນຮັບສະໜອງພຣະຣາຊະດຳຣັດແລ້ວ ເມື່ອກຳລັງທຳຄວາມສະອາດພື້ນທີ່ພຣະຣາຊະອຸທະຍານມິຄະຈີຣະຢູ່ ໄດ້ເຫັນທ່ານພຣະຣັດຖະປາລະນັ່ງພັກກາງເວັນຢູ່ທີ່ເຫງົ້າໄມ້ແຫ່ງໜຶ່ງ ຈຶ່ງເຂົ້າໄປເຝົ້າພຣະເຈົ້າໂກຣັບຍະຮອດບ່ອນຢູ່ ແລ້ວໄດ້ຂາບທູນ ວ່າ

“ຂໍເດຊະ ພຣະຣາຊະອຸທະຍານມິຄະຈີຣະຂອງພຣະອົງສະອາດແລ້ວ ແລະໃນພຣະຣາຊະອຸທະຍານນັ້ນ ມີກຸນລະບຸດຊື່ຣັດຖະປາລະຜູ້ເປັນບຸດແຫ່ງຕະກູນຊັ້ນສູງໃນຖຸນລະໂກດຖິຕະນິຄົມນີ້ ທີ່ພຣະອົງຊົງສັນເສີນຢູ່ສະເໝີ ໆ ທ່ານນັ່ງພັກກາງເວັນຢູ່ທີ່ເຫງົ້າໄມ້ແຫ່ງໜຶ່ງ”

ພຣະເຈົ້າໂກຣັບຍະຕັດວ່າ “ມິຄະວະເພື່ອນຮັກ ຖ້າເຊັ່ນນັ້ນ ບັດນີ້ ຄວນຈະໄປທີ່ອຸທະຍານ ພວກເຮົາຈະເຂົ້າໄປຫາພຣະຜູ້ເປັນເຈົ້າຣັດຖະປາລະໃນບັດນີ້ເລີຍ”

ຄັ້ງນັ້ນ ພຣະເຈົ້າໂກຣັບຍະຮັບສັ່ງວ່າ “ຂອງຫຍ້ຳຂອງບໍຣິໂພກທີ່ຈັດກຽມໄປສູ່ອຸທະຍານນັ້ນ ທ່ານທັງຫລາຍຈົ່ງແຈກຈ່າຍໃຫ້ໝົດສາເທີ້ນ” ແລ້ວຮັບສັ່ງໃຫ້ຈັດຍານພາຫະນະຄັນງາມ ໆ ຫຼາຍຄັນ ຊົງຂຶ້ນພາຫະນະຄັນງາມສະເດັດອອກຈາກຖຸນລະໂກດຖິຕະນິຄົມດ້ວຍຍານພາຫະນະຄັນງາມ ໆ ຕາມສະເດັດດ້ວຍຣາຊານຸພາບຢ່າງຍິ່ງໃຫຍ່ເພື່ອຊົງຢ້ຽມທ່ານພຣະຣັດຖະປາລະສະເດັດໄປຈົນສຸດ ທາງທີ່ຍານພາຫະນະຈະໄປໄດ້ ຈຶ່ງສະເດັດລົງຈາກຍານ ສະເດັດພຣະຣາດຊະດຳເນີນໄປດ້ວຍພຣະບາດ ພ້ອມດ້ວຍບໍລິສັດຊັ້ນສູງ ເຂົ້າໄປຫາທ່ານພຣະຣັດຖປາລະເຖິງທີ່ຢູ່ແລ້ວໄດ້ສົນທະນາປາໄສພໍເປັນທີ່ບັນເທິງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວໄດ້ປະທັບຢືນຢູ່ບ່ອນທີ່ດນຄວນໄດ້ຮັບສັ່ງວ່າ “ນິມົນພຣະຜູ້ເປັນເຈົ້າຣັດຖະປາລະນັ່ງເທິງເຄື່ອງປູລາດນີ້ເທີ້ນ”

ທ່ານພຣະຣັດຖະປາລະ ຖວາຍພຣະພອນວ່າ “ມະຫາບໍພິດ ຢ່າເລີຍ ເຊີນພຣະອົງປະທັບນັ່ງເທີ້ນ ອາດຕະມາພາບນັ່ງທີ່ອາສະນະຂອງອາດຕະມາພາບດີຢູ່ແລ້ວ”

ພຣະເຈົ້າໂກຣັບຍະ ຈຶ່ງປະທັບນັ່ງເທິງບ່ອນປະທັບທີ່ຂ້າຣາດຊະບໍຣິພານຈັດຖວາຍ ແລ້ວໄດ້ຕັດ ກັບທ່ານພຣະຣັດຖະປາລະ ວ່າ

## ຄວາມເສື່ອມ ໔ ປະການ

[໓໐໔] “ພຣະຜູ້ເປັນເຈົ້າຣັດຖະປາລະ ຄວາມເສື່ອມ ໔ ປະການນີ້ ທີ່ຄົນລາງພວກໃນໂລກນີ້ປະສົບເຂົ້າແລ້ວ ຍອມແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ

ຄວາມເສື່ອມ ໔ ປະການ ອັນໃດແດ່ ຄື

໑. ຄວາມເສື່ອມຍ້ອນຊະຣາ ໒. ຄວາມເສື່ອມຍ້ອນຄວາມເຈັບໄຂ້
໓. ຄວາມເສື່ອມຈາກຊັບສົມບັດ ໔. ຄວາມເສື່ອມຈາກຍາດ

ຄວາມເສື່ອມຍ້ອນຊະຣາ ເປັນແນວໃດ?

ຄື ຄົນລາງຄົນໃນໂລກນີ້ເປັນຄົນແກ່ ຄົນເຖົ້າ ເປັນຜູ້ໃຫຍ່ ລ່ວງການຜ່ານໄວມາ ໂດຍລຳດັບ ເຂົາພິຈາລະນາເຫັນດັ່ງນີ້ວ່າ "ບັດນີ້ ເຮົາເປັນຄົນແກ່ແລ້ວ ເປັນຄົນເຖົ້າແລ້ວ ເປັນຜູ້ໃຫຍ່ແລ້ວ ເປັນຜູ້ລ່ວງການຜ່ານໄວມາໂດຍລຳດັບ ການທີ່ເຮົາຈະໄດ້ຄອບຄອງຊັບ ສົມບັດທີ່ຍັງບໍ່ໄດ້ ຫຼື ການທີ່ເຮົາຈະເຮັດຊັບສົມບັດທີ່ໄດ້ແລ້ວໃຫ້ເພີ່ມພູນຂຶ້ນ ບໍ່ແມ່ນເຮັດໄດ້ງ່າຍເລີຍ ທາງທີ່ດີ ເຮົາຄວນແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດເທີ້ນ" ເຂົາປະສົບກັບຄວາມເສື່ອມຍ້ອນຊະຣານັ້ນ ແລ້ວຈຶ່ງແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ ນີ້ຮຽກວ່າ ຄວາມເສື່ອມ ຍ້ອນຊະຣາ

ສ່ວນພຣະຜູ້ເປັນເຈົ້າຣັດຖະປາລະ ບັດນີ້ກໍຍັງໜຸ່ມແໜ້ນ ຜົມດຳປອດ ເປັນໜຸ່ມຢູ່ໃນໄວທຳອິດເລີ່ມ ບໍ່ມີຄວາມເສື່ອມຍ້ອນຊະຣານັ້ນເລີຍ ພຣະຜູ້ເປັນເຈົ້າຣັດຖະປາລະຮູ້ເຫັນ ຫຼື ໄດ້ຟັງອັນໃດ ຈຶ່ງອອກຈາກເຮືອນບວດເປັນບັນພະຊິດ (໑)

ຄວາມເສື່ອມຍ້ອນຄວາມເຈັບໄຂ້ ເປັນແນວໃດ?

ຄື ຄົນລາງຄົນໃນໂລກນີ້ມີຄວາມເຈັບໄຂ້ ມີທຸກ ເຈັບຫຼາຍ ເຂົາພິຈາລະນາເຫັນ ດັ່ງນີ້ວ່າ "ບັດນີ້ ເຮົາເປັນຄົນມີຄວາມເຈັບໄຂ້ ມີທຸກ ເຈັບຫຼາຍ ການທີ່ເຮົາຈະໄດ້ຄອບຄອງ ຊັບສົມບັດທີ່ຍັງບໍ່ໄດ້ ຫຼື ການທີ່ເຮົາຈະເຮັດຊັບສົມບັດທີ່ໄດ້ແລ້ວໃຫ້ເພີ່ມພູນຂຶ້ນ ບໍ່ແມ່ນເຮັດໄດ້ງ່າຍເລີຍ ທາງທີ່ດີ ເຮົາຄວນແຖຜົມແລະໜວດນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດເທີ້ນ" ເຂົາປະສົບກັບຄວາມເສື່ອມຍ້ອນຄວາມເຈັບໄຂ້ນັ້ນ ແລ້ວຈຶ່ງແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ ນີ້ຮຽກວ່າ ຄວາມເສື່ອມຍ້ອນຄວາມເຈັບໄຂ້

ສ່ວນພຣະຜູ້ເປັນເຈົ້າຣັດຖະປາລະ ບັດນີ້ເປັນຜູ້ມີສຸກພາບ ມີໂຣຄາພາດໜ້ອຍ ປະກອບດ້ວຍໄຟທາດທີ່ຍ່ອຍອາຫານສະໝ່ຳສະເໝີດີ ບໍ່ເຢັນຫຼາຍບໍ່ຮ້ອນຫຼາຍ ບໍ່ມີຄວາມເສື່ອມຍ້ອນຄວາມເຈັບໄຂ້ນັ້ນເລີຍ ພຣະຜູ້ເປັນເຈົ້າຣັດຖະປາລະຮູ້ເຫັນຫຼືໄດ້ຟັງອັນໃດ ຈຶ່ງອອກຈາກເຮືອນບວດເປັນບັນພະຊິດ (໒)

ຄວາມເສື່ອມຈາກຊັບສົມບັດ ເປັນແນວໃດ?

ຄື ຄົນລາງຄົນໃນໂລກນີ້ ເປັນຄົນຮັ່ງມີ ມີຊັບຫຼາຍ ມີສົມບັດຫຼາຍ ຊັບສົມບັດເຫຼົ່ານັ້ນຂອງເຂົາເຖິງຄວາມສິ້ນໄປໂດຍລຳດັບ ເຂົາພິຈາລະນາເຫັນດັ່ງນີ້ວ່າ "ແຕ່ກ່ອນ ເຮົາເປັນຄົນຮັ່ງມີ ມີຊັບຫຼາຍ ມີສົມບັດຫຼາຍ ຊັບສົມບັດເຫຼົ່ານັ້ນຂອງເຮົາເຖິງຄວາມສິ້ນໄປໂດຍລຳດັບແລ້ວ ການທີ່ເຮົາຈະໄດ້ຄອບຄອງຊັບສົມບັດທີ່ຍັງບໍ່ໄດ້ ຫຼືການທີ່ເຮົາຈະເຮັດຊັບສົມບັດທີ່ໄດ້ແລ້ວໃຫ້ເພີ່ມພູນຂຶ້ນ ບໍ່ແມ່ນເຮັດໄດ້ງ່າຍເລີຍ ທາງທີ່ດີ ເຮົາຄວນແຖຜົມແລະ ໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພິດເທີ້ນ" ເຂົາປະກອບດ້ວຍ ຄວາມເສື່ອມຈາກຊັບສົມບັດນັ້ນ ຈຶ່ງແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ ນີ້ຮຽກວ່າ ຄວາມເສື່ອມຈາກຊັບສົມບັດ

ສ່ວນພຣະຜູ້ເປັນເຈົ້າຣັດຖະປາລະ ເປັນບຸດຂອງຕະກູນຊັ້ນສູງໃນຖຸນລະໂກດຖິຕະນິຄົມນີ້ ບໍ່ມີຄວາມເສື່ອມຈາກຊັບສົມບັດນັ້ນ ພຣະຜູ້ເປັນເຈົ້າຣັດຖະປາລະຮູ້ເຫັນ ຫຼື ໄດ້ຟັງອັນໃດຈຶ່ງອອກຈາກ ເຮືອນບວດເປັນບັນພະຊິດ (໓)

ຄວາມເສື່ອມຈາກຍາດ ເປັນແນວໃດ?

ຄື ຄົນລາງຄົນໃນໂລກນີ້ ມີມິດ ອຳມາດ ຍາດສາໂລຫິດເປັນຈຳນວນຫລາຍ ຍາດ ເຫຼົ່ານັ້ນຂອງເຂົາເຖິງຄວາມສິ້ນໄປໂດຍລຳດັບ ເຂົາພິຈາລະນາເຫັນດັ່ງນີ້ວ່າ "ແຕ່ກ່ອນ ເຮົາມີ ມິດອຳມາດ ຍາດສາໂລຫິດເປັນຈຳນວນຫລາຍ ພວກຍາດຂອງເຮົານັ້ນເຖິງຄວາມສິ້ນໄປ ໂດຍລຳດັບ ການທີ່ເຮົາຈະໄດ້ຄອບຄອງຊັບສົມບັດທີ່ຍັງບໍ່ໄດ້ ຫຼືການທີ່ເຮົາຈະເຮັດຊັບສົມບັດທີ່ໄດ້ແລ້ວໃຫ້ເພີ່ມພູນຂຶ້ນ ບໍ່ແມ່ນເຮັດໄດ້ງ່າຍເລີຍ ທາງທີ່ດີ ເຮົາຄວນແຖຜົມແລະໜວດນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດເທີ້ນ" ເຂົາປະສົບກັບຄວາມເສື່ອມຈາກຍາດນັ້ນຈຶ່ງແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກ ເຮືອນບວດເປັນບັນພະຊິດ ນີ້ຮຽກວ່າຄວາມເສື່ອມຈາກຍາດ

ສ່ວນພຣະຜູ້ເປັນເຈົ້າຣັດຖະປາລະມີມິດ ອຳມາດ ຍາດສາໂລຫິດເປັນຈຳນວນຫລາຍໃນຖຸນລະໂກດຖິຕະນິຄົມນີ້ ບໍ່ມີຄວາມເສື່ອມຈາກຍາດເລີຍ ພຣະຜູ້ເປັນເຈົ້າຣັດຖະປາລະຮູ້ເຫັນຫຼືໄດ້ຟັງອັນໃດຈຶ່ງ ອອກຈາກເຮືອນບວດເປັນບັນພະຊິດ (໔)

ພຣະຜູ້ເປັນເຈົ້າຣັດຖະປາລະ ຄວາມເສື່ອມ ໔ ປະການນີ້ ທີ່ຄົນລາງພວກໃນໂລກນີ້ປະສົບເຂົ້າແລ້ວຈຶ່ງແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ ພຣະຜູ້ເປັນເຈົ້າຣັດຖະປາລະບໍ່ມີຄວາມເສື່ອມ ໔ ປະການນັ້ນເລີຍ ພຣະຜູ້ເປັນເຈົ້າຣັດຖະປາລະຮູ້ເຫັນ ຫຼື ໄດ້ຟັງອັນໃດຈຶ່ງອອກຈາກເຮືອນບວດເປັນບັນພະຊິດ"

# ທຳມຸດເທດ ໔ ປະການ

[໓໐໕] ທ່ານພຣະຣັດຖະປາລະຖວາຍພຣະພອນວ່າ "ມະຫາບໍພິດ ມີຢູ່ແລ ທີ່ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຊົງສະແດງທຳມຸດເທດ ປະການ ທີ່ອາດຕະມາພາບຮູ້ ເຫັນແລະໄດ້ຟັງແລ້ວ ຈຶ່ງອອກຈາກເຮືອນບວດເປັນບັນພະຊິດ

ທຳມຸດເທດ ໔ ປະການ ອັນໃດແດ່ ຄື

໑. ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ພຣະອົງນັ້ນ ຊົງສະແດງທຳມຸດເທດປະການທີ ໑ ວ່າ "ໂລກອັນຊະຣານຳໄປ ບໍ່ໝັ້ນຍືນ" ທີ່ອາດຕະມາພາບຮູ້ເຫັນ ແລະ ໄດ້ຟັງແລ້ວ ຈຶ່ງໄດ້ອອກຈາກເຮືອນບວດເປັນບັນພະຊິດ

໒. ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ພຣະອົງນັ້ນ ຊົງສະແດງທຳມຸດເທດປະການທີ ໒ ວ່າ "ໂລກບໍ່ມີຜູ້ຕ້ານທານ ບໍ່ເປັນອິດສະຫຼະ" ທີ່ອາດຕະມາພາບຮູ້ເຫັນແລະໄດ້ຟັງແລ້ວຈຶ່ງໄດ້ອອກຈາກເຮືອນບວດເປັນບັນພະຊິດ

໓. ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ພຣະອົງນັ້ນ ຊົງສະແດງທຳມຸດເທດປະການທີ ໓ ວ່າ "ໂລກບໍ່ມີອັນໃດ ເປັນຂອງຕົນ ຈະຕ້ອງລະສິ່ງທັງປວງໄປ" ທີ່ອາດຕະມາພາບຮູ້ເຫັນແລະໄດ້ຟັງແລ້ວ ຈຶ່ງໄດ້ອອກຈາກເຮືອນບວດເປັນບັນພະຊິດ

໔. ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ພຣະອົງນັ້ນ ຊົງສະແດງທຳມຸດເທດປະການທີ ໔ ວ່າ "ໂລກບົກພ້ອງຢູ່ເປັນນິດ ບໍ່ຮູ້ຈັກອິ່ມ ເປັນຂ້າທາດແຫ່ງຕັນຫາ" ທີ່ອາດຕະມາພາບຮູ້ເຫັນ ແລະ ໄດ້ຟັງແລ້ວຈຶ່ງໄດ້ອອກຈາກເຮືອນບວດເປັນບັນພະຊິດ

ມະຫາບໍພິດ ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຊົງສະແດງທຳມຸດເທດ ໔ ປະການນີ້ແລ ທີ່ອາດຕະມາພາບຮູ້ ເຫັນແລະຟັງແລ້ວ ຈຶ່ງໄດ້ອອກຈາກເຮືອນບວດເປັນບັນພະຊິດ"

[໓໐໖] ພຣະເຈົ້າໂກຣັບຍະຕັດຖາມວ່າ "ທ່ານພຣະຣັດຖະປາລະກ່າວວ່າ "ໂລກອັນຊະຣາ ນຳໄປ ບໍ່ໝັ້ນຍືນ" ເນື້ອຄວາມແຫ່ງພາສິດນີ້ ຈະເພິ່ງເຫັນໄດ້ແນວໃດ"

ທ່ານພຣະຣັດຖະປາລະຖວາຍພຣະພອນວ່າ "ມະຫາບໍພິດ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ພຣະອົງເມື່ອມີພຣະຊົນມາຍຸ ໘໐ ພັນສາກໍດີ ໘໕ ພັນສາກໍດີ ຊົງສຶກສາຢ່າງຄ່ອງແຄລ່ວໃນເລື້ອງຊ້າງກໍດີ ເລື້ອງມ້າກໍດີ ເລື້ອງລົດກໍດີ ເລື້ອງທະນູກໍດີ ເລື້ອງອາວຸດກໍດີ ຊົງມີກໍາລັງພຣະເພົາ ຊົງມີກໍາລັງພຣະພາຫາ ຊົງມີພຣະວໍຣະກາຍສາມາດ ຜ່ານເສິກສົງຄາມມາແລ້ວ ບໍ່ແມ່ນບໍ?"

"ພຣະຜູ້ເປັນເຈົ້າຣັດຖະປາລະ ຂ້ານ້ອຍເມື່ອອາຍຸ ໘໐ ປີກໍດີ ໘໕ ປີກໍດີ ໄດ້ສຶກສາຢ່າງຄ່ອງແຄລ່ວໃນເລື້ອງຊ້າງກໍດີ ເລື້ອງມ້າກໍດີ ເລື້ອງລົດກໍດີ ເລື້ອງທະນູກໍດີ ເລື້ອງອາວຸດກໍດີ ມີກໍາລັງຂາ ມີກໍາລັງແຂນ ມີຮ່າງກາຍສາມາດ ເຄີຍຜ່າສົງຄາມມາແລ້ວ ບາງເທື່ອຂ້ານ້ອຍ ຍັງເຂົ້າໃຈວ່າຕົນມີລິດ ບໍ່ເຫັນໃຜສະເໝີດ້ວຍກໍາລັງຂອງຂ້ານ້ອຍເລີຍ"

"ມະຫາບໍພິດ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ແມ່ນບັດນີ້ ພຣະອົງກໍຍັງມີກໍາລັງພຣະເພົາ ມີກໍາລັງພຣະພາຫາ ມີພຣະວໍຣະກາຍສາມາດຜ່າສົງຄາມໄດ້ຄືເກົ່າຢູ່ບໍ?"

"ພຣະຜູ້ເປັນເຈົ້າຣັດຖະປາລະ ຂໍ້ນີ້ເປັນໄປບໍ່ໄດ້ ບັດນີ້ ຂ້ານ້ອຍແກ່ແລ້ວ ຈະເລີນວັຍເປັນຜູ້ໃຫຍ່ ລ່ວງການຜ່ານວັຍມາໂດຍລໍາດັບແລ້ວ ວັຍຂອງຂ້ານ້ອຍລ່ວງໄປ ໘໐ ປີແລ້ວ ບາງເທື່ອ ຂ້ານ້ອຍຄິດວ່າ "ຈັກຢ່າງກ້າວໄປທາງນີ້ກໍໄຂວ້ກ້າວໄປທາງອື່ນສາ"

"ມະຫາບໍພິດ ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສໍາມາສໍາພຸດທະເຈົ້າພຣະອົງນັ້ນ ຊົງໝາຍເຖິງເນື້ອຄວາມນີ້ແລ ຈຶ່ງຕັດທໍາມຸດເທດປະການທີ ໑ ວ່າ "ໂລກອັນຊະຣານໍາໄປ ບໍ່ໝັ້ນຍືນ" ທີ່ອາດຕະມາພາບຮູ້ ເຫັນແລະໄດ້ຟັງແລ້ວ ຈຶ່ງອອກຈາກເຮືອນບວດເປັນບັນພະຊິດ"

"ພຣະຜູ້ເປັນເຈົ້າຣັດຖະປາລະ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ຄໍາວ່າ "ໂລກອັນຊະຣານໍາໄປ ບໍ່ໝັ້ນຍືນ" ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສໍາມາສໍາພຸດທະເຈົ້າ ພຣະອົງນັ້ນ ຕັດໄວ້ດີແລ້ວ ພຣະຜູ້ເປັນເຈົ້າຣັດຖະປາລະ ເປັນຄວາມຈິງ ໂລກອັນຊະຣານໍາໄປ ບໍ່ໝັ້ນຍືນ (໑)

ໃນຣາດຊະຕະກູນນີ້ ມີໝູ່ພົນຊ້າງ ໝູ່ພົນມ້າ ໝູ່ພົນລົດ ແລະໝູ່ພົນຍ່າງ ທີ່ຈັກ ຍໍາຍີອັນຕະລາຍຂອງຂ້ານ້ອຍໄດ້ ທ່ານພຣະຣັດຖະປາລະກ່າວວ່າ "ໂລກບໍ່ມີຜູ້ຕ້ານທານໄດ້ ບໍ່ເປັນອິດສະຫຼະ" ເນື້ອຄວາມແຫ່ງພາສິດນີ້ ຈະເພິ່ງເຫັນໄດ້ແນວໃດ"

"ມະຫາບໍພິດ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ພຣະອົງເຄີຍພຣະປະຊວນໜັກແດ່ບໍ?"

"ພຣະຜູ້ເປັນເຈົ້າຣັດຖະປາລະ ຂ້ານ້ອຍເຄີຍເຈັບຫຼາຍຢູ່ ບາງເທື່ອ ພວກມິດ ອຳມາດ ຍາດສາໂລຫິດຮ້ອມລ້ອມຂ້ານ້ອຍຢູ່ດ້ວຍສຳຄັນວ່າ "ພຣະເຈົ້າໂກຣັບຍະຈັກສະຫວັນຄົດໃນບັດນີ້ ພຣະເຈົ້າໂກຣັບຍະຈັກສະຫວັນຄົດໃນບັດນີ້"

"ມະຫາບໍພິດ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ພຣະອົງໄດ້ມິດ ອຳມາດ ຍາດສາໂລຫິດ (ທີ່ມະຫາບໍພິດຈະຂໍຮ້ອງ) ວ່າ "ມິດ ອຳມາດ ຍາດສາໂລຫິດຜູ້ຈະເລີນຂອງເຮົາທັງໝົດທີ່ມີຢູ່ ຈົ່ງມາຊ່ອຍແບ່ງເວທະນານີ້ໄປ ໂດຍຊ່ອຍເຮົາໃຫ້ໄດ້ສະເຫວີຍເວທະນາເບົາລົງ" ຫຼື ວ່າ ພຣະອົງທໍ່ນັ້ນ ຈະຕ້ອງສະເຫວີຍເວທະນານັ້ນ ແຕ່ຜູ້ດຽວ"

"ພຣະຜູ້ເປັນເຈົ້າຣັດຖະປາລະ ຂ້ານ້ອຍຈະໄດ້ມິດ ອຳມາດ ຍາດສາໂລຫິດ (ທີ່ຂ້ານ້ອຍຈະຂໍຮ້ອງ) ວ່າ "ມິດ ອຳມາດ ຍາດສາໂລຫິດທັງໝົດທີ່ມີຢູ່ ຈົ່ງມາຊ່ອຍແບ່ງເວທະນານີ້ໄປຊ່ອຍເຮົາແດ່ ຈົ່ງໃຫ້ເຮົາໄດ້ສະເຫວີຍເວທະນາເບົາລົງ" ເປັນໄປບໍ່ໄດ້ ແຕ່ຂ້ານ້ອຍເອງທໍ່ນັ້ນຈະຕ້ອງສະເຫວີຍເວທະນານັ້ນ ພຽງແຕ່ຜູ້ດຽວ"

"ມະຫາບໍພິດ ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຊົງໝາຍເຖິງເນື້ອຄວາມນີ້ແລ ຈຶ່ງຕັດທຳມຸດເທດປະການທີ່ ໔ ວ່າ "ໂລກບໍ່ມີຜູ້ຕ້ານທານ ບໍ່ເປັນອິດສະຫຼະ" ທີ່ອາດຕະມາພາບຮູ້ ເຫັນແລະໄດ້ຟັງແລ້ວ ຈຶ່ງອອກຈາກເຮືອນບວດເປັນບັນພະຊິດ"

"ພຣະຜູ້ເປັນເຈົ້າຣັດຖະປາລະ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ຄຳວ່າ "ໂລກບໍ່ມີຜູ້ຕ້ານທານ ບໍ່ເປັນອິດສະຫຼະ" ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ດີແລ້ວ ພຣະຜູ້ເປັນເຈົ້າຣັດຖະປາລະ ເປັນຄວາມຈິງ ໂລກບໍ່ມີຜູ້ຕ້ານທານ ບໍ່ເປັນອິດສະຫຼະ (໔)

ໃນຣາດຊະຕະກູນນີ້ ມີເງິນແລະຄຳຢູ່ໃນພື້ນດິນ ແລະ ເທິງອາກາດຫລວງຫລາຍ ພຣະຜູ້ເປັນເຈົ້າຣັດຖະປາລະກ່າວວ່າ "ໂລກບໍ່ມີອັນໃດເປັນຂອງຕົນ ຈະຕ້ອງລະສິ່ງທັງປວງໄປ" ເນື້ອຄວາມແຫ່ງພາສິດນີ້ ຈະເພິ່ງເຫັນໄດ້ແນວໃດ?"

"ມະຫາບໍພິດ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ບັດນີ້ ພຣະອົງ ເອີບອິ່ມ ພຽບພ້ອມດ້ວຍກາມມະຄຸນ ໕ ປະການ ປົນເປີພຣະອົງຢູ່ ສັນໃດ ພຣະອົງຈັກໄດ້ ສົມພຣະຣາຊະປະສົງວ່າ "ແມ່ນໂລກໜ້າ ເຮົາຈັກເປັນຜູ້ເອີບອິ່ມ ພຽບພ້ອມດ້ວຍກາມມະຄຸນ ໕ ປະການປົນເປີຕົນຢູ່" ສັນນັ້ນຄືກັນ ຫຼື ວ່າ ຊົນເຫຼົ່າອື່ນຈັກປົກຄອງຊັບສົມບັດນີ້ ສ່ວນພຣະອົງກໍຈັກສະເດັດໄປຕາມຍະຖາກຳ"

"ພຣະຜູ້ເປັນເຈົ້າຣັດຖະປາລະ ບັດນີ້ ຂ້ານ້ອຍເອີບອິ່ມພຽບພ້ອມດ້ວຍກາມມະຄຸນ ໕ ປະ

ການ ປົນເປີຕົນຢູ່ ສັນໃດ ຂ້ານ້ອຍກໍຈັກບໍ່ໄດ້ຕາມປະສົງວ່າ "ແມ່ນໃນໂລກໜ້າ ເຮົາຈະເປັນຜູ້ເອີບອີ່ມ ພຽບພ້ອມດ້ວຍກາມມະຄຸນ ໕ ປະການ ປົນເປີຕົນຢູ່" ສັນນັ້ນຄືກັນ ແທ້ທີ່ຈິງຊົນເຫຼົ່າອື່ນຈັກປົກຄອງຊັບສົມບັດນີ້ ສ່ວນຂ້ານ້ອຍກໍຈັກໄປຕາມຍະຖາກໍາ"

"ມະຫາບໍພິດ ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສໍາມາສໍາພຸດທະເຈົ້າພຣະອົງນັ້ນ ຊົງໝາຍເຖິງເນື້ອຄວາມນີ້ແລ ຈຶ່ງຕັດທໍາມຸດເທດປະການທີ ໓ ວ່າ "ໂລກບໍ່ມີອັນໃດເປັນຂອງຕົນ ຈະຕ້ອງລະສິ່ງທັງປວງໄປ" ທີ່ອາດຕະມາພາບຮູ້ເຫັນແລະໄດ້ຟັງແລ້ວ ຈຶ່ງອອກຈາກເຮືອນບວດເປັນບັນພະຊິດ"

"ພຣະຜູ້ເປັນເຈົ້າຣັດຖະປາລະ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ຄໍາວ່າ "ໂລກບໍ່ມີອັນໃດເປັນຂອງຕົນ ຈະຕ້ອງລະສິ່ງທັງປວງນີ້" ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສໍາມາສໍາພຸດທະເຈົ້າພຣະອົງນັ້ນ ຕັດໄວ້ດີແລ້ວ ພຣະຜູ້ເປັນເຈົ້າຣັດຖະປາລະ ເປັນຄວາມຈິງ ໂລກບໍ່ມີອັນໃດເປັນຂອງຕົນ ຈະຕ້ອງລະສິ່ງທັງປວງໄປ (໓)

ທ່ານພຣະຣັດຖະປາລະກ່າວວ່າ "ໂລກບົກພ່ອງຢູ່ສະເໝີ ບໍ່ຮູ້ຈັກອີ່ມ ເປັນຂ້າທາດແຫ່ງຕັນຫາ" ເນື້ອຄວາມແຫ່ງພາສິດນີ້ ຈະເພິ່ງເຫັນໄດ້ແນວໃດ"

"ມະຫາບໍພິດ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ພຣະອົງຊົງ ປົກຄອງແຄວ້ນກຸຣຸອັນອຸດົມສົມບູນຢູ່ ບໍ່ແມ່ນບໍ"

"ແມ່ນແລ້ວ ພຣະຜູ້ເປັນເຈົ້າຣັດຖະປາລະ ຂ້ານ້ອຍປົກຄອງແຄວ້ນກຸຣຸອັນອຸດົມສົມບູນຢູ່"

"ມະຫາບໍພິດ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ຣາຊະບຸຣຸດຂອງພຣະອົງທີ່ແຄວ້ນກຸຣຸນີ້ເປັນທີ່ເຊື່ອຖືໄດ້ ເປັນຄົນມີເຫດຜົນ ມາຈາກທິດຕາເວັນອອກ ເຂົ້າມາເຝົ້າພຣະອົງແລ້ວຂາບທູນແນວນີ້ວ່າ "ຂໍເດຊະມະຫາຣາດເຈົ້າ ພຣະອົງຄວນຊົງຮູ້ວ່າ "ຂ້າພຣະອົງມາຈາກທິດຕາເວັນອອກ ໃນທິດນັ້ນ ຂ້າພຣະອົງໄດ້ເຫັນຊົນນະບົດໃຫຍ່ ຮັ່ງມີ ອຸດົມສົມບູນ ມີປະຊາກອນຫຼາຍ ມີພົນລະເມືອງໜາແໜ້ນ ໃນຊົນນະບົດນັ້ນມີໝູ່ພົນຊ້າງ ໝູ່ພົນມ້າ ໝູ່ພົນລົດໝູ່ພົນຍ່າງ ມີສັດທີ່ມີຊົ້ງວາງາຫຼາຍ ມີເງິນຄໍາທັງທີ່ຍັງບໍ່ໄດ້ຫລອມແລະທີ່ຫລອມແລ້ວເປັນຈໍານວນຫຼາຍ ໃນຊົນນະບົດນັ້ນ ສະຕີເປັນຜູ້ປົກຄອງ ພຣະອົງສາມາດຮົບຊະນະໄດ້ດ້ວຍກໍາລັງພົນປະມານທີ່ນັ້ນ ຂໍພຣະອົງຈົ່ງໄປຮົບຖ້າຈັ່ງຊັ້ນ ມະຫາ-ຣາຊະເຈົ້າ" ພຣະອົງຈະຊົງເຮັດແນວໃດກັບຊົນນະບົດນັ້ນ"

"ພຣະຜູ້ເປັນເຈົ້າຣັດຖະປາລະ ພວກຂ້ານ້ອຍກໍຈັກໄປຮົບເອົາຊົນນະບົດນັ້ນມາຄອບຄອງເສຍ"

"ມະຫາບໍພິດ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ຣາຊະບຸຣຸດຂອງພຣະອົງທີ່ແຄວ້ນກຸຣຸນີ້ເປັນທີ່ເຊື່ອຖືໄດ້ ເປັນຄົນມີເຫດຜົນມາຈາກທິດຕາເວັນຕົກ ໆລໆ ມາຈາກທິດເໜືອ ໆລໆ ມາຈາກທິດໃຕ້ ໆລໆ ມາຈາກສະມຸດຟາກນັ້ນ ເຂົ້າມາເຝົ້າພຣະອົງ ແລ້ວຂາບທູນແນວນີ້ວ່າ "ຂໍເດຊະມະຫາຣາດເຈົ້າ ພຣະອົງຄວນຊົງຮູ້ວ່າ "ຂ້າພຣະອົງມາຈາກມະຫາສະມຸດຟາກນັ້ນ ໃນບ່ອນນັ້ນ ຂ້າພຣະອົງໄດ້ເຫັນຊົນນະບົດໃຫຍ່ ຮັ່ງມີ ອຸດົມສົມບູນ ມີປະຊາກອນຫຼາຍ ມີພົນລະເມືອງໜາແໜ້ນ ໃນຊົນນະບົດນັ້ນມີໝູ່ພົນຊ້າງ ໝູ່ພົນມ້າ ໝູ່ພົນລົດ ໝູ່ພົນຍ່າງ ມີສັດທີ່ມີຊ້ຽວງາຫຼາຍ ມີເງິນຄຳທັງທີ່ຍັງບໍ່ໄດ້ຫລອມ ແລະທີ່ຫລອມແລ້ວເປັນຈຳນວນຫຼາຍ ໃນຊົນນະບົດນັ້ນ ສະຕີເປັນຜູ້ປົກຄອງ ພຣະອົງສາມາດຮົບຊະນະໄດ້ດ້ວຍກຳລັງພົນປະມານທີ່ນັ້ນ ຂໍພຣະອົງຈົ່ງໄປຮົບຖ້າຈັ່ງຊັ້ນ ມະຫາຣາຊະເຈົ້າ" ພຣະອົງຈະຊົງເຮັດແນວໃດກັບຊົນນະບົດນັ້ນ"

"ພຣະຜູ້ເປັນເຈົ້າຣັດຖະປາລະ ພວກຂ້ານ້ອຍກໍຈັກໄປຮົບຕີເອົາຊົນນະບົດນັ້ນມາຄອບຄອງເສຍ"

"ມະຫາບໍພິດ ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນຊົງໝາຍເຖິງເນື້ອຄວາມນີ້ແລ ຈຶ່ງຕັດທຳມຸດເທດປະການທີ ໔ ວ່າ "ໂລກບົກພ່ອງຢູ່ສະເໝີ ບໍ່ຮູ້ຈັກອີ່ມ ເປັນຂ້າທາດແຫ່ງຕັນຫາ" ທີ່ອາດຕະມາພາບຮູ້ ເຫັນແລະໄດ້ຟັງແລ້ວຈຶ່ງອອກຈາກເຮືອນບວດເປັນບັນພະຊິດ"

ພຣະເຈົ້າໂກຣັບຍະຕັດວ່າ "ພຣະຜູ້ເປັນເຈົ້າຣັດຖະປາລະ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ຄຳວ່າ "ໂລກບົກພ່ອງຢູ່ສະເໝີ ບໍ່ຮູ້ຈັກອີ່ມ ເປັນຂ້າທາດແຫ່ງຕັນຫາ" ນີ້ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ດີແລ້ວ ພຣະຜູ້ເປັນເຈົ້າຣັດປາລະ ເປັນຄວາມຈິງ ໂລກບົກພ່ອງຢູ່ສະເໝີ ບໍ່ຮູ້ຈັກອີ່ມ ເປັນຂ້າທາດ ແຫ່ງຕັນຫາ" (໔)

ທ່ານພຣະຣັດຖະປາລະໄດ້ກ່າວເວຍຍາກະຣະໜະພາສິດນີ້ແລ້ວ ໄດ້ກ່າວຄາຖາປະພັນອື່ນອີກຕໍ່ໄປວ່າ

[໓໐໗] "ອາດຕະມາເຫັນຜູ້ຄົນທີ່ມີຊັບໃນໂລກ
ໄດ້ຊັບເຄື່ອງພໍໃຈແລ້ວ
ບໍ່ຍອມໃຫ້ (ໃຜ) ຍ້ອນຄວາມຫລົງ
ໄດ້ຊັບແລ້ວ ເກັບສະສົມໄວ້
ແລະປາຖະໜາການມະຄຸນຍິ່ງ ໆ ຂຶ້ນໄປ
ພຣະຣາຊາຊົງຂົ່ມເຫັງ ເວລາຊົງຍາດເອົາແຜ່ນດິນ
ຊົງຄອບຄອງແຜ່ນດິນເຊິ່ງມີສະມຸດສາຄອນອ້ອມຮອບ

ຕະຫຼອດສະມຸດສາຄອນຝັ່ງນີ້ ແຕ່ຍັງບໍ່ຊືງພໍ
ຍັງປາຖະໜາຈະຄອບຄອງສະມຸດສາຄອນຝັ່ງນັ້ນອີກ

ທັງພຣະຣາຊາແລະຄົນອື່ນເປັນຈຳນວນຫຼາຍ
ຍັງບໍ່ປາສະຈາກຕັນຫາກໍເຂົ້າເຖິງຄວາມຕາຍ
ຍັງບໍ່ເຕັມຕາມທີ່ຕ້ອງການ ແຕ່ກໍຕ້ອງລະຖິ້ມຮ່າງກາຍໄປ
ຍ້ອນຄວາມອີ່ມດ້ວຍກາມບໍ່ມີໃນໂລກ

ໝູ່ຍາດພາກັນສະຫຍາຍຜົມ ໄຫ້ຈົ່ມເຖິງຄົນທີ່ຕາຍນັ້ນ
ແລະເວົ້າວ່າ "ເຮັດແນວໃດນໍ ພວກຍາດຂອງເຮົາທັງຫລາຍຈຶ່ງຈະບໍ່ຕາຍ"
ແຕ່ນັ້ນກໍນຳສົບນັ້ນເຊິ່ງຫໍ່ຜ້າໄວ້ແລ້ວຍົກຂຶ້ນສູ່ກອງຟອນແລ້ວຊ່ອຍກັນເຜົາ

ສົບນັ້ນຖືກເຂົາໃຊ້ຫລາວແທງເຜົາຢູ່
ລະໂພຄະຊັບ ມີແຕ່ຜ້າຜືນດຽວ
ເມື່ອຄົນຈະຕາຍ ຍາດ ມິດ ຫຼື ສະຫາຍກໍຊ່ອຍບໍ່ໄດ້

ທາຍາດທັງຫລາຍກໍຂົນຊັບສົມບັດຂອງເຂົາໄປ
ສ່ວນສັດທີ່ຕາຍໄປກໍຍ່ອມໄປຕາມກຳ
ເມື່ອຕາຍໄປ ຊັບໃດ ໆ ຄື
ບຸດ ພັນລະຍາ ຊັບ ເຂົ້າຂອງ ເງິນຄຳ
ແລະແວ່ນແຄວັນກໍຕິດຕາມໄປບໍ່ໄດ້

ຊັບຊ່ອຍຄົນໃຫ້ມີອາຍຸຍືນບໍ່ໄດ້
ທັງຊ່ອຍຄົນໃຫ້ລະຄວາມແກ່ກໍບໍ່ໄດ້
ນັກປາດທັງຫລາຍກ່າວຊີວິດນັ້ນວ່າໜ້ອຍແທ້
ບໍ່ໝັ້ນຍືນ ມີຄວາມແປປ່ຽນໄປເປັນທຳມະດາ

ທັງຄົນມັ່ງມີ ແລະ ຄົນຍາກຈົນກໍຍ່ອມປະສົບເຊັ່ນນັ້ນ
ທັງຄົນພານແລະບັນດິດກໍປະສົບຄືກັນທັ້ງໝົດ
ຄົນພານນັ້ນ ເມື່ອຖືກເຫດແຫ່ງທຸກກະທົບເຂົ້າ
ຍ່ອມຫວັ່ນໄຫວຍ້ອນຄວາມເປັນຄົນໂງ່
ສ່ວນບັນດິດຖືກກະທົບເຂົ້າບໍ່ຫວັ່ນໄຫວ

ຍ້ອນເຫດນັ້ນແລ ປັນຍາທີ່ນັ້ນເປັນເຫດໃຫ້ບັນລຸນິບພານ
ເຊິ່ງເປັນທີ່ສຸດແຫ່ງພົບໃນໂລກນີ້ ຈຶ່ງປະເສີດກວ່າຊັບ
ກໍຍ້ອນຍັງບໍ່ໄດ້ບັນລຸທີ່ສຸດ ຄົນພານທັງຫລາຍຈຶ່ງເຮັດແຕ່ກຳຊົ່ວ
ໃນພົພນ້ອຍໃຫຍ່ຍ້ອນຄວາມຈ້າ

ຜູ້ເຮັດກຳຊົ່ວ ຕ້ອງວຽນວ່າຍຕາຍເກີດ

ຢູ່ໃນສັງສາຣະວັດບໍ່ສິ້ນສຸດ
ຄົນມີປັນຍາໜ້ອຍ ເມື່ອເຊື່ອຄົນທີ່ເຮັດກຳຊົ່ວນັ້ນ
ກໍຍ່ອມວຽນວ່າຍຕາຍເກີດບໍ່ສິ້ນສຸດ
ໂຈນຜູ້ເຮັດກຳຖືກເຂົາຈັບໄດ້ກົງທາງ ໑ ແຍກ
ຍ່ອມເດືອດຮ້ອນຍ້ອນກຳຂອງຕົນ ສັນໃດ
ໝູ່ສັດຜູ້ເຮັດກຳຊົ່ວຕາຍໄປແລ້ວ ຍ່ອມເດືອດຮ້ອນໃນໂລກໜ້າ
ຍ້ອນກຳຂອງຕົນ ສັນນັ້ນ
ຍ້ອນກຳທັງຫລາຍທີ່ງົດງາມ
ໜ້າປາຖະໜາຊວນໃຫ້ອອນຊອນໃຈ
ຍ່ອມຍ່ຳຍີຈິດໂດຍສະພາວະຕ່າງ ໆ ສັນນັ້ນ
ອາດຕະມາເຫັນໂທດໃນກາມມະຄຸນທັງຫລາຍຈຶ່ງໄດ້ບວດ ມະຫາບໍພິດ
ສັດທັງຫລາຍທັງໜຸ່ມທັງແກ່ ພໍຮ່າງແຕກສະຫຼາຍ
ກໍຫຼົ່ນລົງຄືໝາກໄມ້ສຸກງອມຕົກຫຼົ່ນລົງ
ມະຫາບໍພິດ ອາດຕະມາເຫັນຄວາມບໍ່ທ່ຽງແມ່ນນີ້ ຈຶ່ງໄດ້ບວດ
ຄວາມເປັນສະມະນະທີ່ປະຕິບັດບໍ່ຜິດນັ້ນແລ ປະເສີດກວ່າ" ດັ່ງນີ້ແລ

**ຣັດຖະປາລະສູດທີ່ ໘ ຈົບ**

# ໑. ມະຄະເທວະສູດ

## ວ່າດ້ວຍພຣະເຈົ້າມະຄະເທວະ

[໓໐໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ທີ່ອຳພະວັນຂອງພຣະເຈົ້າມະຄະເທວະ ເຂດນະຄອນມິຖິລາ ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າຊົງຍິ້ມ ໃນສະຖານທີ່ແຫ່ງໜຶ່ງ ລຳດັບນັ້ນ ທ່ານພຣະອານົນໄດ້ຄິດວ່າ "ອັນໃດນໍ ເປັນເຫດເປັນປັດໄຈໃຫ້ພຣະຜູ້ມີພຣະພາກເຈົ້າຊົງຍິ້ມ ພຣະຕະຖາຄົດທັງຫລາຍບໍ່ຊົງຍິ້ມໂດຍບໍ່ມີສາເຫດ" ແລ້ວຈຶ່ງ ຫົ່ມຈີວອນບ່ຽງບ່າປະນົມມືໄປທາງທີ່ທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໄດ້ທູນຖາມວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ພຣະຜູ້ມີພຣະພາກເຈົ້າຊົງ

ຍິ້ມ ພຣະຕະຖາຄົດທັງຫລາຍບໍ່ຊົງຍິ້ມໂດຍບໍ່ມີສາເຫດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ເລື້ອງເຄີຍມີມາແລ້ວ ໃນນະຄອນມິຖິລານີ້ແລ ໄດ້ມີພຣະຣາຊາຊົງພຣະນາມວ່າມະຄະເທວະ ເປັນຜູ້ຊົງທຳ ເປັນທຳມະຣາຊາ ເປັນມະຫາຣາດຜູ້ຕັ້ງໝັ້ນໃນທຳ ຊົງປະພຶດທຳໃນພາມແລະຄະຫະບໍດີ ໃນຊາວນິຄົມແລະຊາວຊົນນະບົດ ຊົງຖືຮັກສາອຸໂປສົດທຸກມື້ ໑໔ ຄ່ຳ ໑໕ ຄ່ຳ ແລະມື້ ໘ ຄ່ຳ ແຫ່ງປັກ ຄັ້ງນັ້ນ ເມື່ອລ່ວງໄປຫຼາຍປີ ຫລາຍຮ້ອຍປີ ຫຼາຍພັນປີ ພຣະເຈົ້າມະຄະເທວະຮັບສັ່ງຮຽກຊ່າງຕັດຜົມ ມາຕັດວ່າ "ຊ່າງຕັດຜົມເພື່ອນຮັກ ເມື່ອໃດທ່ານເຫັນຜົມຫງອກເກີດເທິງຫົວຂອງເຮົາ ເມື່ອນັ້ນໃຫ້ບອກເຮົາ"

ຄັ້ງນັ້ນ ຊ່າງຕັດຜົມທູນຮັບສະໜອງພຣະຣາຊະດຳຣັດແລ້ວ ເມື່ອລ່ວງໄປຫຼາຍປີ ຫລາຍຮ້ອຍປີ ຫຼາຍພັນປີ ຊ່າງຕັດຜົມໄດ້ເຫັນພຣະເກສາຫງອກເກີດແລ້ວເທິງພຣະສຽນຂອງພຣະເຈົ້າມະຄະເທວະ ໄດ້ຂາບທູນວ່າ "ເທວະທູດ ຜາກົດແກ່ພຣະອົງແລ້ວ ພຣະເກສາຫງອກເກີດແລ້ວເທິງພຣະສຽນຜາກົດຢູ່"

ພຣະເຈົ້າມະຄະເທວະຕັດວ່າ "ຊ່າງຕັດຜົມເພື່ອນຮັກ ຖ້າເຊັ່ນນັ້ນ ທ່ານຈົ່ງໃຊ້ແໜບລົກຜົມຫງອກນັ້ນໃຫ້ດີ ແລ້ວວາງລົງທີ່ກະພຸ່ມມືຂອງເຮົາເທີ້ນ"

ອານົນ ຊ່າງຕັດຜົມທູນຮັບສະໜອງພຣະຣາຊະດຳຣັດແລ້ວ ຈຶ່ງໃຊ້ແໜບລົກພຣະເກສາຫງອກນັ້ນຢ່າງດີ ແລ້ວວາງລົງເທິງກະພຸ່ມພຣະຫັດຂອງພຣະເຈົ້າມະຄະເທວະ

## ພຣະເຈົ້າມະຄະເທວະອອກບວດ

[໓໐໙] ຄັ້ງນັ້ນ ພຣະເຈົ້າມະຄະເທວະພຣະຣາດຊະທານບ້ານສ່ວຍແກ່ຊ່າງຕັດຜົມແລ້ວຮັບສັ່ງໃຫ້ຮຽກພຣະຣາດຊະກຸມານຜູ້ເປັນໂອຣົດອົງໃຫຍ່ມາເຝົ້າແລ້ວຕັດວ່າ "ລູກເອີຍ ເທວະທູດຜາກົດແກ່ພໍ່ແລ້ວ ຜົມຫງອກເກີດແລ້ວເທິງຫົວຜາກົດຢູ່ ກາມທັງຫລາຍທີ່ເປັນຂອງ ມະນຸດ ພໍ່ໄດ້ບໍຣິໂພກແລ້ວ ເວລານີ້ເປັນເວລາທີ່ຈະສະແຫວງຫາກາມທັງຫລາຍທີ່ເປັນທິບ ມາເທີ້ນລູກເອີຍ ລູກຈົ່ງປົກຄອງຣາດຊະສົມບັດນີ້ ສ່ວນພໍ່ຈັກແຖຜົມແລະໜວດ ນຸ່ງຫົ່ມ ຜ້າກາສາວະພັດ ອອກຈາກວັງບວດເປັນບັນພະຊິດ ເມື່ອໃດ ລູກເຫັນຜົມຫງອກເກີດແລ້ວ ເທິງຫົວ ເມື່ອນັ້ນລູກຈົ່ງໃຫ້ບ້ານສ່ວຍແກ່ຊ່າງຕັດຜົມ ເພິ່ງພ່ຳສອນຣາດຊະກຸມານຜູ້ເປັນໂອຣົດອົງໃຫຍ່ໃນການຄອງຣາດຊະສົມບັດໃຫ້ດີ ແລ້ວແຖຜົມແລະໜວດນຸ່ງຫົ່ມຜ້າກາສາວະພັດ ອອກຈາກວັງບວດເປັນບັນພະຊິດເທີ້ນ ລູກເພິ່ງປະພຶດຂໍ້ວັດປະຕິບັດອັນງາມຕາມວິທີທີ່ພໍ່ຕັ້ງໄວ້ນີ້ ລູກຢ່າເປັນຄົນສຸດທ້າຍຂອງພໍ່ເລີຍ ເມື່ອຍຸກຂອງຄົນໃດເປັນໄປຢູ່ ແຕ່ປ່ອຍໃຫ້ຂໍ້ວັດປະຕິບັດ ອັນງາມເຫັນຢູ່ແນວນັ້ນຂາດສູນໄປ ຄົນນັ້ນຊື່ວ່າເປັນຄົນສຸດທ້າຍຂອງຣາຊະບັນພະຊິດນັ້ນ ລູກເອີຍ ພໍ່ກ່າວແນວນີ້ວ່າ "ລູກເພິ່ງປະພຶດຂໍ້ວັດປະຕິບັດອັນງາມຕາມວິທີທີ່ພໍ່ຕັ້ງໄວ້ນີ້ ລູກຢ່າເປັນຄົນສຸດທ້າຍຂອງພໍ່ເລີຍ"

ຄັ້ງນັ້ນ ພຣະເຈົ້າມະຄະເທວະເມື່ອພຣະຣາດຊະທານບ້ານສ່ວຍແກ່ຊ່າງຕັດຜົມແລະຊົງພໍ່າສອນ ພຣະຣາດຊະກຸມານຜູ້ເປັນໂອຣົດອົງໃຫຍ່ໃນການຄອງຣາດຊະສົມບັດໃຫ້ດີແລ້ວ ຊົງປົງພຣະເກສາແລະພຣະມັດສຸ ຊົງນຸ່ງຫົ່ມຜ້າກາສາວະພັດ ແລ້ວສະເດັດອອກຈາກວັງບວດເປັນບັນພະຊິດ ທີ່ມຄເທວະອຳພະວັນນີ້ ພຣະອົງຊົງມີເມດຕາຈິດແຜ່ໄປຕະຫຼອດທິດທີ່ ໑ ຢູ່ ທິດທີ ໒ ໆລໆ ທິດທີ ໓ ໆລໆ ທິດທີ ໔ ໆລໆ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ຊົງແຜ່ໄປຕະຫຼອດໂລກ ທົ່ວທຸກໝູ່ເຫຼົ່າໃນບ່ອນທຸກສະຖານດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ຊົງມີ ກະລຸນາຈິດ ໆລໆ

ຊົງມີ ມຸທິຕາຈິດ ໆລໆ

ຊົງມີ ອຸເປກຂາຈິດ ແຜ່ໄປຕະຫຼອດທິດທີ່ ໑ ຢູ່ ທິດທີ ໒ ໆລໆ ທິດທີ ໓ ໆລໆ ທິດທີ ໔ ໆລໆ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ຊົງແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນບ່ອນທຸກສະຖານ ດ້ວຍອຸເປກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ອານົນ ພຣະເຈົ້າມະຄະເທວະຊົງຫຼິ້ນຄືເດັກນ້ອຍຢູ່ ໘໔,໐໐໐ ປີ ຊົງດຳລົງຕຳແໜ່ງ ອຸປະຣາດຢູ່ ໘໔,໐໐໐ ປີ ຊົງີຄອງຣາດຢູ່ ໘໔,໐໐໐ ປີ ສະເດັດອອກຈາກວັງບວດ ເປັນບັນພະຊິດປະພຶດພົມມະຈັນຢູ່ທີ່ມຄເທວະອຳພະວັນນີ້ອີກ ໘໔,໐໐໐ ປີ ພຣະອົງຊົງຈະເລີນພົມວິຫານ ໔ ປະການ ຫລັງຈາກສະຫວັນຄົດແລ້ວໄດ້ສະເດັດເຂົ້າເຖິງພົມມະໂລກ

## ໂອຣົດຂອງພຣະເຈົ້າມະຄະເທວະອອກບວດ

[໓໑໐] ອານົນ ຄັ້ງນັ້ນແລ ເມື່ອລ່ວງໄປຫຼາຍປີ ຫລາຍຮ້ອຍປີ ຫຼາຍພັນປີ ພຣະຣາຊະໂອຣົດຂອງພຣະເຈົ້າມະຄະເທວະ ຮັບສັ່ງຮຽກຊ່າງຕັດຜົມມາຕັດວ່າ “ຊ່າງຕັດຜົມ ເພື່ອນຮັກ ເມື່ອໃດທ່ານເຫັນຜົມຫງອກ ເກີດແລ້ວເທິງຫົວຂອງເຮົາ ເມື່ອນັ້ນໃຫ້ບອກເຮົາ”

ຄັ້ງນັ້ນ ຊ່າງຕັດຜົມທູນຮັບສະໜອງພຣະຣາຊະດຳຣັດແລ້ວ ເມື່ອລ່ວງໄປຫຼາຍປີ ຫຼາຍຮ້ອຍປີ ຫຼາຍພັນປີ ຊ່າງຕັດຜົມໄດ້ເຫັນເສັ້ນພຣະເກສາຫງອກເກີດແລ້ວເທິງພຣະສຽນຂອງພຣະຣາຊະໂອຣົດຂອງພຣະເຈົ້າມະຄະເທວະໄດ້ຂາບທູນວ່າ “ເທວະທູດຜາກົດແກ່ພຣະອົງແລ້ວ ພຣະເກສາຫງອກເກີດແລ້ວເທິງພຣະສຽນຜາກົດຢູ່”

ພຣະຣາຊະໂອຣົດຂອງພຣະເຈົ້າມະຄະເທວະຕັດວ່າ “ ຊ່າງຕັດຜົມເພື່ອນຮັກ ຖ້າເຊັ່ນນັ້ນ ທ່ານຈົ່ງໃຊ້ແໜບລົກຜົມຫງອກນັ້ນໃຫ້ດີ ແລ້ວວາງເທິງກະພຸ່ມມືຂອງເຮົາເທີ້ນ”

ຊ່າງຕັດຜົມທູນຮັບສະໜອງພຣະຣາຊະດໍາຣັດແລ້ວ ຈຶ່ງໃຊ້ແໜບລົກພຣະເກສາຫງອກ ນັ້ນຢ່າງດີ ແລ້ວວາງເທິງກະພຸ່ມພຣະຫັດຂອງພຣະຣາຊະໂອຣົດຂອງພຣະເຈົ້າມະຄະເທວະ

ຄັ້ງນັ້ນ ພຣະຣາຊະໂອຣົດຂອງພຣະເຈົ້າມະຄະເທວະ ໄດ້ພຣະຣາດຊະທານບ້ານສ່ວຍ ແກ່ຊ່າງ ຕັດຜົມ ແລ້ວຮັບສັ່ງໃຫ້ຮຽກພຣະຣາດຊະກຸມານຜູ້ເປັນໂອຣົດພຣະອົງໃຫຍ່ມາເຝົ້າຕັດ ວ່າ "ລູກເອີຍ ເທວະທູດຜາກົດແກ່ພໍ່ແລ້ວ ຜົມຫງອກເກີດແລ້ວເທິງຫົວຜາກົດຢູ່ ການທັງຫລາຍ ທີ່ເປັນຂອງ ມະນຸດພໍ່ບໍຣິໂພກແລ້ວ ເວລານີ້ເປັນເວລາທີ່ຈະສະແຫວງຫາການອັນເປັນທິບ ມາ ເທີ້ນ ລູກເອີຍ ລູກຈົ່ງປົກຄອງຣາດຊະສົມບັດນີ້ ສ່ວນພໍ່ຈັກແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາ ວະພັດອອກຈາກວັງບວດເປັນບັນພະຊິດ ເມື່ອໃດ ລູກເຫັນຜົມຫງອກເກີດແລ້ວເທິງຫົວ ເມື່ອນັ້ນ ລູກເພິ່ງໃຫ້ບ້ານສ່ວຍແກ່ຊ່າງຕັດຜົມ ແລ້ວເພິ່ງພ່ຳສອນຣາດຊະກຸມານຜູ້ເປັນໂອຣົດອົງໃຫຍ່ໃນ ການ ຄອງຣາດຊະສົມບັດໃຫ້ດີ ແລ້ວເພິ່ງແຖຜົມແລະໜວດນຸ່ງຫົ່ມຜ້າກາສາວະພັດ ອອກຈາກ ວັງບວດເປັນບັນພະຊິດເທີ້ນ ລູກເພິ່ງປະພຶດຂໍ້ວັດປະຕິບັດອັນງາມຕາມວິທີທີ່ພໍ່ຕັ້ງໄວ້ນີ້ ລູກຢ່າ ເປັນຄົນສຸດທ້າຍຂອງພໍ່ເລີຍ

ເມື່ອຍຸກຂອງຄົນໃດເປັນໄປຢູ່ ແຕ່ປ່ອຍໃຫ້ຂໍ້ວັດປະຕິບັດອັນງາມເຫັນຢູ່ແນວນັ້ນຂາດສູນ ໄປ ຄົນນັ້ນ ຊື່ວ່ າເປັນຄົນສຸດທ້າຍຂອງຣາຊະບັນພະຊິດນັ້ນ ລູກເອີຍ ພໍ່ກ່າວແນວນີ້ວ່າ "ລູກ ເພິ່ງປະພຶດຂໍ້ວັດປະຕິບັດ ອັນງາມຕາມວິທີທີ່ພໍ່ຕັ້ງໄວ້ແລ້ວນີ້ ລູກຢ່າເປັນຄົນສຸດທ້າຍຂອງພໍ່ເລີຍ"

ຄັ້ງນັ້ນ ພຣະຣາຊະໂອຣົດຂອງພຣະເຈົ້າມະຄະເທວະ ເມື່ອພຣະຣາດຊະທານບ້ານສ່ວຍ ແກ່ຊ່າງ ຕັດຜົມ ແລະຊົງພ່ຳສອນພຣະຣາດຊະກຸມານຜູ້ເປັນໂອຣົດອົງໃຫຍ່ ໃນການຄອງຣາດ ຊະສົມບັດ ໃຫ້ດີແລ້ວ ຊົງປົງພຣະເກສາແລະພຣະມັດສຸ ຊົງນຸ່ງຫົ່ມຜ້າກາສາວະພັດແລ້ວສະເດັດ ອອກຈາກວັງ ບວດເປັນບັນພະຊິດຢູ່ໃນມົກເທວະອຳພະວັນນີ້ ພຣະອົງຊົງມີເມດຕາຈິດ ແຜ່ໄປ ຕະຫຼອດທິດ ທີ່ ໑ ຢູ່ ທິດທີ ໒ ຯລຯ ທິດທີ ៣ ຯລຯ ທິດທີ ៤ ຯລຯ ທິດເບື້ອງເທິງ ທິດ ເບື້ອງລຸ່ມ ທິດສຽງ ຊົງແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນບ່ອນທຸກສະຖານດ້ວຍເມດຕາຈິດ ອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ຊົງມີ ກະລຸນາຈິດ ຯລຯ

ຊົງມີ ມຸທິຕາຈິດ ຯລຯ

ຊົງມີອຸເປກຂາຈິດ ແຜ່ໄປຕະຫຼອດທິດທີ່ ໑ ຢູ່ ທິດທີ ໒ ຯລຯ ທິດທີ ៣ ຯລຯ ທິດທີ ៤ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ຊົງແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນບ່ອນ ທຸກສະຖານ ດ້ວຍອຸເປກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມ ບຽດບຽນຢູ່

ອານົນ ພຣະຣາຊະໂອຣົດຂອງພຣະເຈົ້າມະຄະເທວະຊົງຫຼິ້ນຄືເດັກນ້ອຍຢູ່ ໘໔,໐໐໐ ປີ ຊົງດໍາລົງຕໍາແໜ່ງອຸປະຣາດຢູ່ ໘໔,໐໐໐ ປີ ຊົງຄອງຣາດຢູ່ ໘໔,໐໐໐ ປີ ສະເດັດ ອອກຈາກວັງ ບວດເປັນບັນພະຊິດ ປະພຶດພົມມະຈັນຢູ່ທີ່ມຄເທວະອຳພະວັນນີ້ອີກ ໘໔,໐໐໐ ປີ ພຣະອົງຊົງ ຈະເລີນພົມວິຫານ ໔ ປະການ ຫລັງຈາກສະຫວັນຄົດແລ້ວ ໄດ້ສະເດັດເຂົ້າເຖິງພົມມະໂລກ

## ພຣະຣາດຊະນັດດາຂອງພຣະເຈົ້າມະຄະເທວະອອກບວດ

[໓໑໑] ອານົນ ພຣະຣາຊະໂອຣົດ ແລະ ພຣະຣາຊະນັດດາຂອງພຣະເຈົ້າມະຄະເທວະ ສືບຣາຊະວົງ ຕໍ່ມາ ໘໔,໐໐໐ ຊົ່ວກະສັດ ໄດ້ປົງພຣະເກສາແລະພຣະມັດສຸ ນຸ່ງຫົ່ມຜ້າກາສາວະ ພັດ ສະເດັດອອກຈາກວັງບວດເປັນບັນພະຊິດ ຢູ່ໃນມົກເທວະອຳພະວັນນີ້ ພຣະອົງເຫຼົ່ານັ້ນຊົງມີ ເມດຕາຈິດ ແຜ່ໄປຕະຫຼອດທິດທີ່ ໑ ຢູ່ ທິດທີ ໒ ກໍ່ຄືກັນ ທິດທີ ໓ ກໍ່ຄືກັນ ທິດທີ ໔ ກໍ່ຄືກັນ ທິດ ເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ຊົງແຜ່ໄປຕະຫຼອດໂລກທົ່ວໝູ່ເຫຼົ່າໃນບ່ອນທຸກສະຖານ ດ້ວຍ ເມດຕາຈິດ ອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ຊົງມີ ກະລຸນາຈິດ ກໍ່ຄືກັນ

ຊົງມີ ມຸທິຕາຈິດ  ກໍ່ຄືກັນ

ຊົງມີອຸເປກຂາຈິດ ແຜ່ໄປຕະຫຼອດທິດທີ່ ໑ ຢູ່ ທິດທີ່ ໒ ກໍ່ຄືກັນ ທິດທີ່ ໓ ກໍ່ຄືກັນ ທິດ ທີ່ ໔ ກໍ່ຄືກັນ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ຊົງແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນບ່ອນ ທຸກສະຖານ ດ້ວຍອຸເປກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມ ບຽດບຽນຢູ່

ພຣະອົງເຫຼົ່ານັ້ນຊົງຫຼິ້ນຄືເດັກນ້ອຍຢູ່ ໘໔,໐໐໐ ປີ ຊົງດໍາລົງຕໍາແໜ່ງອຸປະຣາດ ຢູ່ ໘໔,໐ ໐໐ ປີ ຊົງຄອງຣາດຢູ່ ໘໔,໐໐໐ ປີ ສະເດັດອອກຈາກວັງບວດເປັນ ບັນພະຊິດ ປະພຶດພົມມະ ຈັນຢູ່ທີ່ມຄເທວະອຳພະວັນນີ້ອີກ ໘໔,໐໐໐ ປີ ພຣະອົງຊົງຈະເລີນພົມວິຫານ ໔ ປະການ ຫລັງ ຈາກສະຫວັນຄົດແລ້ວໄດ້ສະເດັດເຂົ້າເຖິງພົມມະໂລກ

ພຣະເຈົ້ານິມິເປັນພຣະຣາຊາອົງສຸດທ້າຍແຫ່ງຣາຊະບັນພະຊິດນັ້ນ ເປັນຜູ້ຊົງທຳ ເປັນ ທຳມະຣາຊາ ເປັນມະຫາຣາດຜູ້ຕັ້ງໝັ້ນໃນທຳ ຊົງປະພຶດທຳໃນພາມ ແລະ ຄະຫະບໍດີ ໃນຊາວ ນິຄົມ ແລະ ຊາວຊົນນະບົດ ແລະ ຊົງຖືຮັກສາອຸໂປສົດທຸກມື້ ໑໔ ຄ່ຳ ໑໕ ຄ່ຳ ແລະມື້ ໘ ຄ່ຳ ແຫ່ງປັກ

## ພຣະເຈົ້ານິມິຖືຮັກສາອຸໂປສົດ

[໓໑໔] ອານົນ ເລື້ອງເຄີຍມີມາແລ້ວ ອັນຕະຣາກະຖານີ້ເກີດຂຶ້ນແລ້ວແກ່ເທບທັງຫລາຍ

ຊັ້ນຕາວະຕິງສາຜູ້ນັ່ງປະຊຸມກັນໃນສະພາຊື່ ສຸທຳມາ ວ່າ "ທ່ານຜູ້ຈະເລີນທັງຫລາຍ ເປັນລາບຂອງຊາວວິເທຫະນໍ ຊາວວິເທຫະໄດ້ດີແລ້ວນໍ ທີ່ພຣະເຈົ້ານິມິເປັນຜູ້ຊົງທຳ ເປັນ ທຳມະຣາຊາ ເປັນມະຫາຣາດຜູ້ຕັ້ງໝັ້ນໃນທຳ ຊົງປະພຶດທຳໃນພາມແລະຄະຫະບໍດີ ໃນຊາວນິຄົມແລະຊາວຊົນນະບົດ ແລະຊົງຖືຮັກສາອຸໂປສົດທຸກມື້ ໑໔ ຄ່ຳ ໑໕ ຄ່ຳ ແລະມື້ ໘ ຄ່ຳແຫ່ງປັກ"

ລຳດັບນັ້ນ ທ້າວສັກກະຈອມເທບ ຕັດຮຽກເທບທັງຫລາຍຊັ້ນຕາວະຕິງສາມາຖາມວ່າ "ທ່ານຜູນິຣະທຸກທັງຫລາຍ ທ່ານທັງຫລາຍປາຖະໜາຈະເຫັນພຣະເຈົ້ານິມິບໍ?" ເທບທັງຫລາຍຊັ້ນຕາວະຕິງສາ ທູນຕອບວ່າ "ຂ້າແດ່ ພຣະອົງຜູນິຣະທຸກ ພວກຂ້າພຣະອົງປາຖະໜາຈະເຫັນພຣະເຈົ້ານິມິ"

ອານົບ ສະໄໝນັ້ນ ໃນມື້ອຸໂປສົດ ໑໕ ຄ່ຳ ພຣະເຈົ້ານິມິຊົງນ້ຳພຣະກາຍທົ່ວ ພຣະສຽນແລ້ວ ຊົງຖືຮັກສາອຸໂປສົດ ປະທັບນັ່ງຢູ່ແລ້ວເທິງຜາສາດອັນປະເສີດຊັ້ນເທິງ ຄັ້ງນັ້ນ ທ້າວສັກກະຈອມເທບໄດ້ຊົງອັນຕະຣະທານຈາກເທບທັງຫລາຍຊັ້ນຕາວະຕິງສາ ໄປຜາກົດສະເພາະພຣະພັກພຣະເຈົ້ານິມິ" ປຽບຄືຄົນທີ່ແຂງແຮງຢຽດແຂນອອກຫຼືຄູ້ແຂນເຂົ້າ ແລ້ວຕັດກັບພຣະເຈົ້ານິມິວ່າ "ມະຫາຣາດ ເປັນລາບຂອງພຣະອົງ ພຣະອົງໄດ້ດີແລ້ວ ເທບທັງຫລາຍຊັ້ນຕາວະຕິງສານັ່ງປະຊຸມສັນເສີນກັນຢູ່ໃນສະພາຊື່ສຸທຳມາວ່າ "ທ່ານຜູ້ຈະເລີນທັງຫລາຍ ເປັນລາບຂອງຊາວວິເທຫະນໍ ຊາວວິເທຫະໄດ້ດີແລ້ວນໍ ທີ່ພຣະເຈົ້ານິມິເປັນຜູ້ຊົງທຳ ເປັນທຳມະຣາຊາ ເປັນມະຫາຣາດຜູ້ຕັ້ງໝັ້ນໃນທຳ ຊົງປະພຶດທຳ ໃນພາມແລະຄະຫະບໍດີ ໃນຊາວນິຄົມແລະຊາວຊົນນະບົດ ແລະຊົງຖືຮັກສາອຸໂປສົດທຸກມື້ ໑໔ ຄ່ຳ ໑໕ ຄ່ຳ ແລະມື້ ໘ ຄ່ຳແຫ່ງປັກ" ມະຫາຣາດ ເທບທັງຫລາຍຊັ້ນຕາວະຕິງສາ ປາຖະໜາຈະເຫັນພຣະອົງ ຂ້ານ້ອຍຈະສົ່ງລົດທຽມດ້ວຍມ້າອາຊາໄນ ໑,໐໐໐ ໂຕມາເພື່ອພຣະອົງ ພຣະອົງຊົງຂຶ້ນປະທັບເທິງທິບພະຍານເທີ້ນ ຢ່າຊົງຫວັ່ນພຣະຫະໄທເລີຍ"

ເມື່ອແລ້ວ ພຣະເຈົ້ານິມິຊົງຮັບເຊີນໂດຍດຸດສະນີພາບ

## ພຣະເຈົ້ານິມິທອດພຣະເນດນະຮົກແລະສະຫວັນ

[໓໑໓] ອານົບ ຄັ້ງນັ້ນ ທ້າວສັກກະຈອມເທບຮູ້ອາການທີ່ພຣະເຈົ້ານິມິຊົງຮັບເຊີນແລ້ວຈຶ່ງອັນຕະຣະທານຈາກທີ່ສະເພາະພຣະພັກຂອງພຣະເຈົ້ານິມິມາຜາກົດໃນໝູ່ເທບ ຊັ້ນຕາວະຕິງສາ ປຽບຄືຄົນທີ່ແຂງແຮງຢຽດແຂນອອກຫຼືຄູ້ແຂນເຂົ້າ ລຳດັບນັ້ນ ທ້າວສັກກະຈອມເທບ ຮັບສັ່ງຮຽກມາຕະລີເທບພະບຸດຜູ້ຮັບໃຊ້ມາຕັດວ່າ "ມາເທີ້ນ ມາຕະລີ ເພື່ອນຮັກ ທ່ານຈົ່ງຈັດລົດທຽມດ້ວຍມ້າອາຊາໄນ ໑,໐໐໐ ໂຕ ແລ້ວເຂົ້າໄປເຝົ້າພຣະເຈົ້ານິມິ" ຈົ່ງທູນແນວນີ້ວ່າ "ມະຫາຣາດລົດທຽມດ້ວຍມ້າອາຊາໄນ ໑,໐໐໐ ໂຕນີ້ ທ້າວສັກກະ ຈອມເທບຊົງສົ່ງມາຮັບພຣະອົງ ພຣະອົງ

ເພີ່ງສະເດັດຂຶ້ນປະທັບຍັງທິບພະຍານເທີ້ນ ຢ່າຊົງຫວັ່ນພຣະທະໄທເລີຍ"

ມາຕະລີເທບພະບຸດຜູ້ຮັບໃຊ້ທູນຮັບສະໜອງພຣະດຳຣັດແລ້ວ ຈັດລົດທຽມດ້ວຍມ້າອາຊາໄນ ໑,໐໐໐ ໂຕ ເຂົ້າໄປເຝົ້າພຣະເຈົ້ານິມິແລ້ວທູລວ່າ "ມະຫາຣາດ ລົດທີ່ທຽມດ້ວຍມ້າອາຊາໄນ ໑,໐໐໐ ໂຕນີ້ ທ້າວສັກກະຈອມເທບສົ່ງມາຮັບພຣະອົງ ເຊີນສະເດັດຂຶ້ນປະທັບຍັງທິບພະຍານເທີ້ນ ຢ່າຊົງຫວັ່ນພຣະທະໄທເລີຍ ອັນໜຶ່ງ ທາງສຳລັບສັດຜູ້ມີບາບກຳ ສະເຫວີຍຜົນຂອງບາບກຳທາງໜຶ່ງ ທາງສຳລັບສັດຜູ້ມີກຳອັນງາມ ສະເຫວີຍຜົນຂອງກຳອັນງາມທາງໜຶ່ງ ຂ້າພຣະອົງຈະເຊີນສະເດັດໄປທາງໃດ ໂດຍຂ້ານ້ອຍ"

ພຣະເຈົ້ານິມິດຣັດວ່າ "ມາຕະລີ ຈົ່ງນຳເຮົາໄປທັງສອງທາງນັ້ນແລ"

ອານົນ ມາຕະລີເທບພະບຸດຜູ້ຮັບໃຊ້ ນຳສະເດັດພຣະເຈົ້ານິມິເຖິງສະພາຊື່ສຸທຳມາ ທ້າວສັກກະ ຈອມເທບ ທອດພຣະເນດເຫັນພຣະເຈົ້ານິມິຜູ້ກຳລັງສະເດັດມາແຕ່ໄກ ຈຶ່ງຕັດວ່າ "ມະຫາຣາດ ເຊີນສະເດັດເຂົ້າມາເທີ້ນ ຂ້ານ້ອຍສະເດັດມະຫາຣາດ ເທບທັງຫລາຍຊັ້ນຕາວະຕິງສາປາຖະໜາ ຈະເຫັນພຣະອົງ ປະຊຸມສັນເສີນກັນຢູ່ໃນສະພາຊື່ສຸທຳມາວ່າ "ທ່ານຜູ້ຈະເລີນ ເປັນລາບ ຂອງຊາວວິເທຫະນໍ ຊາວວິເທຫະໄດ້ດີແລ້ວນໍ ທີ່ພຣະເຈົ້ານິມິເປັນຜູ້ຊົງທຳ ເປັນທຳມະຣາຊາ ເປັນມະຫາຣາດຜູ້ຕັ້ງໝັ້ນໃນທຳ ຊົງປະພຶດທຳໃນພາມ ແລະ ຄະຫະບໍດີ ໃນຊາວນິຄົມແລະຊາວຊົນນະບົດ ແລະຊົງຖືຮັກສາອຸໂປສົດທຸກມື້ ໑໔ ຄ່ຳ ໑໕ ຄ່ຳ ແລະມື້ ໘ ຄ່ຳແຫ່ງປັກ" ມະຫາຣາດ ເທບທັງຫລາຍຊັ້ນຕາວະຕິງສາປາຖະໜາຈະເຫັນ ພຣະອົງ ຂໍເຊີນພຣະອົງຊົງອະພິຣົມຢູ່ໃນໝູ່ເທບທັງຫລາຍ ດ້ວຍເທວານຸພາບເທີ້ນ"

ພຣະເຈົ້ານິມິດຣັດວ່າ "ຢ່າເລີຍ ພຣະອົງຜູນິຣະທຸກ ຂໍຈົ່ງນຳຂ້ານ້ອຍກັບໄປໃນກຣຸງມິຖິລາ ໃນມະນຸດສາໂລກນັ້ນເທີ້ນ ຂ້ານ້ອຍຈະໄດ້ປະພຶດທຳແນວນັ້ນ ໃນພາມແລະຄະຫະບໍດີ ໃນຊາວນິຄົມແລະຊາວຊົນນະບົດ ແລະຈັກໄດ້ຖືຮັກສາອຸໂປສົດທຸກມື້ ໑໔ ຄ່ຳ ໑໕ ຄ່ຳ ແລະມື້ ໘ ຄ່ຳແຫ່ງປັກຕໍ່ໄປ"

## ພຣະເຈົ້ານິມິອອກບວດ

[໓໑໔] ອານົນ ລຳດັບນັ້ນ ທ້າວສັກກະຈອມເທພຮັບສັ່ງຮຽກມາຕະລີເທບພະບຸດ ຜູ້ຮັບໃຊ້ມາຕັດວ່າ "ມາເທີ້ນ ມາຕະລີເພື່ອນຮັກ ທ່ານຈົ່ງຈັດລົດທຽມດ້ວຍມ້າອາຊາໄນ ໑,໐໐໐ ໂຕ ນຳພຣະເຈົ້ານິມິກັບໄປໃນກຣຸງມິຖິລາໃນມະນຸດສາໂລກນັ້ນເທີ້ນ"

ມາຕະລີເທບພະບຸດຜູ້ຮັບໃຊ້ທູນຮັບສະໜອງພຣະດຳຣັດແລ້ວ ຈັດລົດທຽມດ້ວຍມ້າອາຊາໄນ ໑,໐໐໐ ໂຕ ແລ້ວນຳພຣະເຈົ້ານິມິສະເດັດກັບໄປໃນກຣຸງມິຖິລາໃນມະນຸດສາໂລກນັ້ນ ໄດ້

ຂ່າວວ່າ ສະໄໝນັ້ນ ພຣະເຈົ້ານິມິຊົງປະພຶດທຳໃນພາມແລະຄະຫະບໍດີ ໃນຊາວນິຄົມແລະຊາວຊົນນະບົດ ແລະຊົງຖືຮັກສາອຸໂປສົດທຸກມື້ ໑໔ ຄ່ຳ ໑໕ ຄ່ຳ ແລະມື້ ໘ ຄ່ຳແຫ່ງປັກ ຕໍ່ມາເມື່ອລ່ວງໄປຫຼາຍປີ ຫລາຍຮ້ອຍປີ ຫຼາຍພັນປີ ພຣະເຈົ້ານິມິຮັບສັ່ງຮຽກຊ່າງຕັດຜົມ ມາຕັດວ່າ “ຊ່າງຕັດຜົມເພື່ອນຮັກ ເມື່ອໃດທ່ານເຫັນຜົມຫງອກເກີດແລ້ວເທິງຫົວຂອງເຮົາ ເມື່ອນັ້ນໃຫ້ບອກເຮົາ”

ຊ່າງຕັດຜົມທູນຮັບສະໜອງພຣະຣາຊະດຳຣັດແລ້ວ ເມື່ອລ່ວງໄປຫຼາຍປີ ຫລາຍຮ້ອຍປີ ຫຼາຍພັນປີ ຊ່າງຕັດຜົມໄດ້ເຫັນພຣະເກສາຫງອກເກີດແລ້ວເທິງພຣະສຽນຂອງພຣະເຈົ້ານິມິ ຈຶ່ງຂາບທູນວ່າ “ເທວະທູດຜາກົດແກ່ພຣະອົງແລ້ວ ພຣະເກສາຫງອກເກີດແລ້ວເທິງພຣະສຽນຜາກົດຢູ່”

ພຣະເຈົ້ານິມິດຣັດວ່າ “ຊ່າງຕັດຜົມເພື່ອນຮັກ ຖ້າເຊັ່ນນັ້ນ ທ່ານຈົ່ງໃຊ້ແໜບລົກຜົມຫງອກນັ້ນໃຫ້ດີ ແລ້ວວາງລົງໃສ່ມືຂອງເຮົາ”

ຊ່າງຕັດຜົມທູນຮັບສະໜອງພຣະຣາຊະດຳຣັດແລ້ວ ຈຶ່ງໃຊ້ແໜບລົກພຣະເກສາຫງອກນັ້ນຢ່າງດີ ແລ້ວວາງລົງໃສ່ພຣະຫັດຂອງພຣະເຈົ້ານິມິ

ອານົນ ຕໍ່ມາ ພຣະເຈົ້ານິມິພຣະຣາດຊະທານບ້ານສ່ວຍແກ່ຊ່າງຕັດຜົມແລ້ວຮັບສັ່ງ ໃຫ້ຮຽກພຣະຣາດຊະກຸມານຜູ້ເປັນໂອຣົດອົງໃຫຍ່ມາຕັດວ່າ “ລູກເອີຍ ເທວະທູດຜາກົດ ແກ່ພໍ່ແລ້ວຜົມຫງອກເກີດແລ້ວເທິງຫົວຜາກົດຢູ່ ກາມທັງຫລາຍທີ່ເປັນຂອງມະນຸດ ພໍ່ບໍຣິໂພກແລ້ວ ເວລານີ້ເປັນເວລາທີ່ຈະສະແຫວງຫາກາມອັນເປັນທິບ ມາເທີ້ນລູກເອີຍ ລູກຈົ່ງປົກຄອງຣາດຊະສົມບັດນີ້ ສ່ວນພໍ່ຈັກແຖຜົມແລະໜວດນຸ່ງຫົ່ມຜ້າກາສາວະພັດອອກຈາກວັງ ບວດເປັນບັນພະຊິດ ເມື່ອໃດລູກເຫັນຜົມຫງອກເກີດແລ້ວເທິງຫົວ ເມື່ອນັ້ນລູກຈົ່ງໃຫ້ບ້ານສ່ວຍແກ່ຊ່າງຕັດຜົມ ເພິ່ງພ່ຳສອນຣາດຊະກຸມານຜູ້ເປັນໂອຣົດອົງໃຫຍ່ໃນການຄອງຣາດຊະສົມບັດ ໃຫ້ດີ ແລ້ວແຖຜົມແລະໜວດນຸ່ງຫົ່ມຜ້າກາສາວະພັດ ອອກຈາກວັງບວດເປັນບັນພະຊິດເທີ້ນ ລູກເພິ່ງປະພຶດຂໍ້ວັດປະຕິບັດອັນງາມຕາມວິທີທີ່ພໍ່ຕັ້ງໄວ້ນີ້ ລູກຢ່າເປັນຄົນສຸດທ້າຍຂອງພໍ່ເລີຍ ເມື່ອຍຸກຂອງຄົນໃດເປັນໄປຢູ່ ແຕ່ປ່ອຍໃຫ້ຂໍ້ວັດປະຕິບັດອັນງາມເຫັນຢູ່ແນວນັ້ນຂາດສູນໄປ ຄົນນັ້ນຊື່ວ່າ ເປັນຄົນສຸດທ້າຍຂອງຣາຊະບັນພະຊິດນັ້ນ ລູກເອີຍ ພໍ່ກ່າວແນວນີ້ວ່າ “ລູກເພິ່ງປະພຶດຂໍ້ວັດປະຕິບັດ ອັນງາມຕາມວິທີທີ່ພໍ່ຕັ້ງໄວ້ແລ້ວນີ້ ລູກຢ່າເປັນຄົນສຸດທ້າຍຂອງພໍ່ເລີຍ”

## ພຣະເຈົ້າກະລາຣົກຊະນົກເປັນອົງສຸດທ້າຍ

[๓໑໕] ອານົນ ຄັ້ງນັ້ນ ພຣະເຈົ້ານິມິເມື່ອພຣະຣາດຊະທານບ້ານສ່ວຍແກ່ຊ່າງຕັດຜົມແລ້ວ ຊົງພ່ຳສອນພຣະຣາດຊະກຸມານຜູ້ເປັນໂອຣົດອົງໃຫຍ່ ໃນການຄອງຣາດຊະສົມບັດໃຫ້ດີແລ້ວ ຊົງແຖພຣະເກສາແລະພຣະມັດສຸ ນຸ່ງຫົ່ມຜ້າກາສາວະພັດສະເດັດອອກຈາກວັງບວດເປັນ

ບັນພະຊິດ ນະ ມິກາເທວະອຳພະວັນນີ້ ພຣະອົງມີເມດຕາຈິດ ແຜ່ໄປຕະຫຼອດທິດທີ່ ໑ ຢູ່ ທິດທີ ໒ ຍລຯ ທິດທີ ໓ ຍລຯ ທິດທີ ໔ ຍລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ຊົງແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນບ່ອນທຸກສະຖານດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ຊົງມີ ກະລຸນາຈິດ ຯລຯ

ຊົງມີ ມຸທິຕາຈິດ ຯລຯ

ຊົງມີອຸເປກຂາຈິດ ແຜ່ໄປຕະຫຼອດທິດທີ່ ໑ ຢູ່ ທິດທີ ໒ ຍລຯ ທິດທີ ໓ ຍລຯ ທິດທີ ໔ ຍລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ຊົງແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນບ່ອນທຸກສະຖານ ດ້ວຍອຸເປກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ພຣະເຈົ້ານິມິຊົງຫຼິ້ນຄືເດັກນ້ອຍຢູ່ ໘໔,໐໐໐ ປີ ຊົງດຳລົງຕຳແໜ່ງອຸປະຣາດຢູ່ ໘໔,໐໐໐ ປີ ຊົງຄອງຣາດຢູ່ ໘໔,໐໐໐ ປີ ສະເດັດອອກຈາກວັງບວດເປັນບັນພະຊິດ ປະພຶດພົມມະຈັນຢູ່ທີ່ມຄເທວະອຳພະວັນນີ້ນັ້ນແລອີກ ໘໔,໐໐໐ ປີ ພຣະອົງຊົງຈະເລີນ ພົມວິຫານ ໔ ປະການ ຫລັງຈາກສະຫວັນຄົດແລ້ວໄດ້ສະເດັດເຂົ້າເຖິງພົມມະໂລກ

ອານົນ ພຣະເຈົ້ານິມິມີພຣະຣາຊະໂອຣົດພຣະນາມວ່າກລານກຊະນົກ ພຣະຣາດຊະກຸມານນັ້ນ ບໍ່ໄດ້ອອກຈາກວັງບວດເປັນບັນພະຊິດ ຊົງຕັດຂໍ້ວັດປະຕິບັດອັນງາມນັ້ນແລ້ວ ໄດ້ຊື່ວ່າເປັນມະນຸດຄົນສຸດທ້າຍແຫ່ງຣາຊະບັນພະຊິດນັ້ນ

[໓໑໖] ອານົນ ທ່ານຄົງຈະຄິດແນວນີ້ວ່າ “ສະໄໝນັ້ນ ພຣະເຈົ້າມະຄະເທວະເຊິ່ງຊົງຕັ້ງຂໍ້ວັດປະຕິບັດອັນງາມນັ້ນຄົງເປັນຄົນອື່ນເປັນແນ່” ແຕ່ຂໍ້ນັ້ນທ່ານບໍ່ເພິ່ງເຫັນແນວນັ້ນ ສະໄໝນັ້ນເຮົາເປັນພຣະເຈົ້າມະຄະເທວະ ໄດ້ຕັ້ງຂໍ້ວັດປະຕິບັດອັນງາມນັ້ນໄວ້ ປະຊາຊົນຜູ້ເກີດມາພາຍຫລັງປະພຶດຕາມຂໍ້ວັດປະຕິບັດອັນງາມທີ່ເຮົາຕັ້ງໄວ້ແລ້ວນັ້ນ ແຕ່ຂໍ້ວັດປະຕິບັດອັນງາມນັ້ນບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ແລະເພື່ອນິບພານ ເປັນໄປພຽງເພື່ອເຂົ້າເຖິງພົມມະໂລກທໍ່ນັ້ນ ສ່ວນຂໍ້ວັດປະຕິບັດອັນງາມທີ່ເຮົາຕັ້ງໄວ້ໃນບັດນີ້ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ແລະ ເພື່ອນິບພານ ໂດຍສ່ວນດຽວ

ຂໍ້ວັດປະຕິບັດອັນງາມທີ່ເຮົາຕັ້ງໄວ້ໃນບັດນີ້ ເຊິ່ງເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ແລະ ເພື່ອນິບພານ ໂດຍສ່ວນດຽວ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ໄດ້ແກ່

| | | | |
|---|---|---|---|
| ໑. ສຳມາທິດຖິ | (ເຫັນຖືກ) | ໔. ສຳມາສັງກັບປະ | (ຄິດຖືກ) |
| ໓. ສຳມາວາຈາ | (ເຈຣະຈາຖືກ) | ໔. ສຳມາກຳມັນຕະ | (ການງານຖືກ) |
| ໕. ສຳມາອາຊີວະ | (ລ້ຽງຊີວິດຖືກ) | ໖. ສຳມາວາຍາມະ | (ພະຍາຍາມຖືກ) |
| ໗. ສຳມາສະຕິ | (ຣະນຶກຖືກ) | ໘. ສຳມາສະມາທິ | (ຕັ້ງຈິດໝັ້ນຖືກ) |

ຂໍ້ວັດປະຕິບັດອັນງາມທີ່ເຮົາຕັ້ງໄວ້ໃນບັດນີ້ນີ້ແລ ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ແລະ ເພື່ອນິບພານ ໂດຍສ່ວນດຽວ

ອານົນ ເຮົາຂໍເຕືອນທ່ານທັງຫລາຍແນວນີ້ວ່າ "ທ່ານທັງຫລາຍຄວນປະພຶດຂໍ້ວັດປະຕິບັດອັນງາມຕາມວິທີທີ່ເຮົາຕັ້ງໄວ້ແລ້ວ ທ່ານທັງຫລາຍຢ່າເປັນຄົນສຸດທ້າຍຂອງເຮົາເລີຍ" ເມື່ອຍຸກຂອງຄົນໃດເປັນໄປຢູ່ ແຕ່ປ່ອຍໃຫ້ຂໍ້ວັດປະຕິບັດອັນງາມເຫັນຢູ່ແນວນັ້ນຂາດສູນໄປ ຄົນນັ້ນຊື່ວ່າຄົນ ສຸດທ້າຍຂອງບຸຣຸດເຫຼົ່ານັ້ນ ເຮົາຂໍເຕືອນທ່ານທັງຫລາຍແນວນີ້ວ່າ "ທ່ານທັງຫລາຍຄວນປະພຶດ ຂໍ້ວັດປະຕິບັດອັນງາມຕາມວິທີທີ່ເຮົາຕັ້ງໄວ້ແລ້ວ ທ່ານທັງຫລາຍຢ່າເປັນຄົນສຸດທ້າຍຂອງເຮົາເລີຍ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະອານົນມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ມະຄະເທວະສູດທີ່ ໓ ຈົບ**

# ໔. ມະທຸຣະສູດ

## ວ່າດ້ວຍພຣະເຈົ້າມະທຸຣະ

[໓໑໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ທ່ານພຣະມະຫາກັດຈານະຢູ່ທີ່ປ່າຄຸນທາມີ້ ເຂດນະຄອນມະທຸຣາ ພຣະເຈົ້າມະທຸຣະ ອະວັນຕິບຸດໄດ້ຊົງສະດັບວ່າ "ທ່ານຜູ້ຈະເລີນທັງຫລາຍ ໄດ້ຂ່າວວ່າ ທ່ານສະມະນະນາມວ່າກັດຈານະ ຢູ່ທີ່ປ່າຄຸນທາມີ້ ເຂດນະຄອນມະທຸຣາ ທ່ານພຣະມະຫາກັດຈານະນັ້ນມີກິດຕິສັບ ອັນງາມຊ່າລືໄປແລ້ວແນວນີ້ວ່າ "ເປັນບັນດິດ ສະຫຼາດ ມີປັນຍາ ເປັນພະຫູສູດ ມີຄຳເວົ້າ

ສະລະສະລວຍ ມີປະຕິພານດີ ເປັນຜູ້ໃຫຍ່ ແລະເປັນພຣະອະຣະຫັນ ການເຫັນພຣະອະຣະຫັນທັງຫລາຍ ເຊັ່ນນັ້ນ ເປັນຄວາມດີຢ່າງແທ້ຈິງ”

ລຳດັບນັ້ນ ພຣະເຈົ້າມະທຸຣະ ອະວັນຕີບຸດຮັບສັ່ງໃຫ້ຈັດຍານພາຫະນະຄັນງາມ ໆ ຫຼາຍຄັນ ຊົງຂຶ້ນຍານພາຫະນະຄັນງາມ ສະເດັດອອກຈາກນະຄອນມະທຸຣາພ້ອມກັບຍານພາຫະນະຄັນງາມ ໆ ຕາມສະເດັດດ້ວຍຣາຊານຸພາບຢ່າງຍິ່ງໃຫຍ່ ເພື່ອຊົງຢ້ຽມທ່ານພຣະມະຫາກັດຈາໃນສະເດັດໄປ ຈົນສຸດທາງທີ່ຍານພາຫະນະຈະໄປໄດ້ ຈຶ່ງສະເດັດລົງຈາກຍານ ສະເດັດພຣະຣາດຊະດຳເນີນດ້ວຍພຣະບາດ ເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ແລ້ວໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮັບສັ່ງວ່າ

“ພຣະຜູ້ເປັນເຈົ້າກັດຈານະ ພາມທັງຫລາຍກ່າວແນວນີ້ວ່າ “ວັນນະທີ່ປະເສີດທີ່ສຸດ ຄືວັນນະພາມທໍ່ນັ້ນ ວັນນະອື່ນຊົ່ວ ວັນນະທີ່ຂາວຄືວັນນະພາມ ທໍ່ນັ້ນ ວັນນະອື່ນດຳ ພາມທໍ່ນັ້ນບໍລິສຸດ ຜູ້ທີ່ບໍ່ແມ່ນພາມບໍ່ບໍລິສຸດ ພາມ ທໍ່ນັ້ນເປັນບຸດ ເປັນໂອຣົດ ເກີດຈາກໂອດຂອງພົມ ເກີດຈາກພົມ ເປັນຜູ້ທີ່ພົມ ສ້າງຂຶ້ນ ເປັນທາຍາດຂອງພົມ” ເລື້ອງນີ້ພຣະຜູ້ເປັນເຈົ້າກັດຈານະຈະກ່າວແນວໃດ”

ທ່ານພຣະມະຫາກັດຈານະຖວາຍພຣະພອນວ່າ “ມະຫາບໍພິດ ວາທະທີ່ພວກພາມ ກ່າວວ່າ “ວັນນະທີ່ປະເສີດທີ່ສຸດຄືວັນນະພາມທໍ່ນັ້ນ ວັນນະອື່ນຊົ່ວ ວັນໃນທີ່ຂາວຄືວັນນະພາມທໍ່ນັ້ນ ວັນນະອື່ນດຳ ພາມທໍ່ນັ້ນບໍລິສຸດ ຜູ້ທີ່ບໍ່ແມ່ນພາມບໍ່ບໍລິສຸດ ພາມທໍ່ນັ້ນເປັນບຸດ ເປັນໂອຣົດ ເກີດຈາກໂອດຂອງພົມ ເກີດຈາກພົມ (ເປັນຜູ້ທີ່ພົມສ້າງຂຶ້ນ) ເປັນທາຍາດຂອງພົມ” ນັ້ນເປັນພຽງຄຳໂຄດນາ ໃນໂລກທໍ່ນັ້ນ

ມະຫາບໍພິດ ໂດຍປະຣິຍາຍນີ້ ພຣະອົງຊົງຮູ້ເທີ້ນວ່າ ວາທະທີ່ພວກພາມ ກ່າວວ່າ “ວັນນະທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ວັນນະອື່ນຊົ່ວ ຯລຯ ເປັນທາຍາດ ຂອງພົມ” ນັ້ນເປັນພຽງຄຳໂຄສະນາໃນໂລກທໍ່ນັ້ນ”

[๓๑๗] ທ່ານພຣະມະຫາກັດຈານະຖວາຍພຣະພອນວ່າ “ມະຫາບໍພິດ ພຣະອົງຊົງ ເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ຖ້າແມ່ນກະສັດຈະເພິ່ງເຮັດໃຫ້ຄວາມຕ້ອງການຊັບ ເຂົ້າເປືອກ ເງິນ ຫຼືຄຳສຳເລັດໄດ້ ແມ່ນກະສັດ (ອື່ນ) ກໍຈະເພິ່ງລຸກຂຶ້ນກ່ອນ ນອນພາຍຫລັງ ຖ້າຮັບໃຊ້ ປະຕິບັດໃຫ້ຖືກໃຈ ເວົ້າມ່ວນຕໍ່ກະສັດພຣະອົງນັ້ນແມ່ນບໍ ແມ່ນພາມ ຯລຯ ແມ່ນແພດ ຯລຯ ແມ່ນສູດກໍຈະເພິ່ງລຸກຂຶ້ນກ່ອນ ນອນພາຍຫລັງ ຖ້າຮັບໃຊ້ ປະຕິບັດໃຫ້ຖືກໃຈ ເວົ້າມ່ວນຕໍ່ກະສັດພຣະອົງນັ້ນແມ່ນບໍ”

ພຣະເຈົ້າມະຫຸຣະ ອະວັນຕິບຸດ ຕັດວ່າ "ພຣະຜູ້ເປັນເຈົ້າກັດຈານະ ຖ້າແມ່ນກະສັດຈະເພິ່ງເຮັດໃຫ້ຄວາມຕ້ອງການຊັບ ເຂົ້າເປືອກ ເງິນ ຫຼືຄຳສຳເລັດໄດ້ ແມ່ນກະສັດ(ອື່ນ) ກໍຈະເພິ່ງລຸກຂຶ້ນກ່ອນ ນອນພາຍຫລັງ ຖ້າຮັບໃຊ້ ປະຕິບັດໃຫ້ຖືກໃຈ ເວົ້າມ່ວນຕໍ່ກະສັດ ພຣະອົງນັ້ນ ແມ່ນພາມ ໆລໆ ແມ່ນແພດ ໆລໆ ແມ່ນສູດກໍຈະເພິ່ງລຸກຂຶ້ນກ່ອນ ນອນພາຍຫລັງ ຖ້າຮັບໃຊ້ ປະຕິບັດໃຫ້ຖືກໃຈ ເວົ້າມ່ວນຕໍ່ກະສັດພຣະອົງນັ້ນ"

"ມະຫາບໍພິດ ພຣະອົງຊົງເຂົ້າພຣະຫະໄທຄວາມຂໍ້ນັ້ນວ່າແນວໃດ ຖ້າແມ່ນພາມ ຈະເພິ່ງເຮັດໃຫ້ຄວາມຕ້ອງການຊັບ ເຂົ້າເປືອກ ເງິນ ຫຼືຄຳສຳເລັດໄດ້ ແມ່ນພາມ(ອື່ນ) ກໍຈະເພິ່ງລຸກຂຶ້ນກ່ອນ ນອນພາຍຫລັງ ຖ້າຮັບໃຊ້ ປະຕິບັດໃຫ້ຖືກໃຈ ເວົ້າມ່ວນຕໍ່ພາມນັ້ນ ແມ່ນບໍ ແມ່ນແພດ ໆລໆ ແມ່ນສູດ ໆລໆ ແມ່ນກະສັດ ກໍຈະເພິ່ງລຸກຂຶ້ນກ່ອນ ນອນພາຍຫລັງ ຖ້າຮັບໃຊ້ ປະຕິບັດໃຫ້ຖືກໃຈ ເວົ້າມ່ວນຕໍ່ພາມນັ້ນແມ່ນບໍ"

"ພຣະຜູ້ເປັນເຈົ້າກັດຈານະ ຖ້າແມ່ນພາມຈະເພິ່ງເຮັດໃຫ້ຄວາມຕ້ອງການຊັບ ເຂົ້າເປືອກ ເງິນ ຫຼືຄຳສຳເລັດໄດ້ ແມ່ນພາມ(ອື່ນ) ກໍຈະເພິ່ງລຸກຂຶ້ນກ່ອນ ນອນພາຍຫລັງ ຖ້າຮັບໃຊ້ ປະຕິບັດໃຫ້ຖືກໃຈ ເວົ້າມ່ວນຕໍ່ພາມນັ້ນ ແມ່ນແພດ ໆລໆ ແມ່ນສູດ ໆລໆ ແມ່ນກະສັດ ກໍຈະເພິ່ງລຸກຂຶ້ນກ່ອນ ນອນພາຍຫລັງ ຖ້າຮັບໃຊ້ ປະຕິບັດໃຫ້ຖືກໃຈ ເວົ້າມ່ວນຕໍ່ພາມນັ້ນ"

"ມະຫາບໍພິດ ພຣະອົງຊົງເຂົ້າພຣະຫະໄທຄວາມຂໍ້ນັ້ນວ່າແນວໃດ ຖ້າແມ່ນແພດຈະເພິ່ງເຮັດໃຫ້ຄວາມຕ້ອງການຊັບ ເຂົ້າເປືອກ ເງິນ ຫຼືຄຳສຳເລັດໄດ້ ແມ່ນແພດ(ອື່ນ) ກໍຈະເພິ່ງລຸກຂຶ້ນກ່ອນ ນອນພາຍຫລັງ ຖ້າຮັບໃຊ້ ປະຕິບັດໃຫ້ຖືກໃຈ ເວົ້າມ່ວນຕໍ່ແພດນັ້ນ ແມ່ນບໍ? ແມ່ນສູດ ໆລໆ ແມ່ນກະສັດ ໆລໆ ແມ່ນພາມ ກໍຈະເພິ່ງລຸກຂຶ້ນກ່ອນ ນອນພາຍຫລັງ ຖ້າຮັບໃຊ້ ປະຕິບັດໃຫ້ຖືກໃຈ ເວົ້າມ່ວນຕໍ່ແພດນັ້ນແມ່ນບໍ?"

"ພຣະຜູ້ເປັນເຈົ້າກັດຈານະ ຖ້າແມ່ນແພດຈະເພິ່ງເຮັດໃຫ້ຄວາມຕ້ອງການຊັບ ເຂົ້າເປືອກ ເງິນ ຫຼືຄຳສຳເລັດໄດ້ ແມ່ນແພດ(ອື່ນ)ກໍຈະເພິ່ງລຸກຂຶ້ນກ່ອນ ນອນພາຍຫລັງ ຖ້າຮັບໃຊ້ ປະຕິບັດໃຫ້ຖືກໃຈ ເວົ້າມ່ວນຕໍ່ແພດນັ້ນ ແມ່ນສູດ ໆລໆ ແມ່ນກະສັດ ໆລໆ ແມ່ນພາມ ກໍຈະເພິ່ງລຸກຂຶ້ນກ່ອນ ນອນພາຍຫລັງ ຖ້າຮັບໃຊ້ ປະຕິບັດໃຫ້ຖືກໃຈ ເວົ້າມ່ວນຕໍ່ແພດນັ້ນ"

"ມະຫາບໍພິດ ພຣະອົງຊົງເຂົ້າພຣະຫະໄທຄວາມຂໍ້ນັ້ນວ່າແນວໃດ ຖ້າແມ່ນສູດຈະເພິ່ງເຮັດໃຫ້ຄວາມຕ້ອງການຊັບ ເຂົ້າເປືອກ ເງິນ ຫຼືຄຳສຳເລັດໄດ້ ແມ່ນສູດ (ອື່ນ) ກໍຈະເພິ່ງລຸກຂຶ້ນກ່ອນ ນອນພາຍຫລັງ ຖ້າຮັບໃຊ້ ປະຕິບັດໃຫ້ຖືກໃຈ ເວົ້າມ່ວນຕໍ່ສູດນັ້ນແມ່ນບໍ? ແມ່ນກະສັດ ໆລໆ ແມ່ນພົມ ໆລໆ ແມ່ນແພດ ກໍຈະເພິ່ງລຸກຂຶ້ນກ່ອນ ນອນພາຍຫລັງ ຖ້າຮັບໃຊ້ ປະຕິບັດໃຫ້ຖືກໃຈ ເວົ້າມ່ວນຕໍ່ສູດນັ້ນແມ່ນບໍ?"

"ພຣະຜູ້ເປັນເຈົ້າກັດຈານະ ຖ້າແມ່ນສູດຈະເພິ່ງເຮັດໃຫ້ຄວາມຕ້ອງການຊັບ ເຂົ້າເປືອກ ເງິນ ຫຼືຄໍາສໍາເລັດໄດ້ ແມ່ນສູດ (ອື່ນ) ກໍຈະເພິ່ງລຸກຂຶ້ນກ່ອນ ນອນພາຍຫລັງ ຖ້າຮັບໃຊ້ ປະຕິບັດໃຫ້ຖືກໃຈ ເວົ້າມ່ວນຕໍ່ສູດນັ້ນ ແມ່ນກະສັດ ໆລໆ ແມ່ນພາມ ໆລໆ ແມ່ນແພດ ກໍຈະ ເພິ່ງລຸກຂຶ້ນກ່ອນ ນອນພາຍຫລັງ ຖ້າຮັບໃຊ້ ປະຕິບັດໃຫ້ຖືກໃຈ ເວົ້າມ່ວນຕໍ່ສູດນັ້ນ"

"ມະຫາບໍພິດ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ຖ້າເມື່ອເປັນແນວນີ້ ວັນນະທັງ ໔ ຈໍາພວກນີ້ຍ່ອມເປັນຜູ້ສະເໝີກັນ ແມ່ນບໍ? ຫຼື ພຣະອົງຊົງເຂົ້າພຣະທະໄທໃນ ວັນນະ ໔ ຈໍາພວກນີ້ວ່າແນວໃດ"

"ພຣະຜູ້ເປັນເຈົ້າກັດຈານະ ເມື່ອເປັນແນວນີ້ ວັນນະ ໔ ຈໍາພວກນີ້ກໍສະເໝີກັນໝົດ ແນ່ນອນ ໃນວັນນະທັງ ໔ ຈໍາພວກນີ້ ຂ້ານ້ອຍບໍ່ເຫັນຄວາມແຕກຕ່າງອັນໃດກັນເລີຍ"

"ມະຫາບໍພິດ ໂດຍປະຣິຍາຍນີ້ ພຣະອົງຊົງຮູ້ເທີ້ນວ່າ ວາທະທີ່ພວກພາມ ກ່າວວ່າ "ວັນນະທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ວັນນະອື່ນຊົ່ວ ໆລໆ ເປັນທາຍາດ ຂອງພົມ" ນັ້ນເປັນຄໍາ ໂຄສະນາໃນໂລກນີ້ທໍ່ນັ້ນ"

[໓໑໙] ທ່ານພຣະມະຫາກັດຈານະຖວາຍພຣະພອນວ່າ "ມະຫາບໍພິດ ພຣະອົງຊົງ ເຂົ້າ ພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ກະສັດໃນໂລກນີ້ເພິ່ງຂ້າສັດ ລັກຊັບ ປະພຶດຜິດໃນການ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄໍາຫຍາບ ເວົ້າບໍ່ມີສາຣະ ເປັນຜູ້ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ມີ ຈິດພະຍາບາດ ເປັນມິດສາທິດຖິ ຫລັງຈາກຕາຍແລ້ວເພິ່ງໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ແມ່ນບໍ? ຫຼື ພຣະອົງຊົງເຂົ້າພຣະທະໄທໃນເລື້ອງນີ້ວ່າແນວໃດ"

ພຣະເຈົ້າມະທຸຣະ ອະວັນຕິບຸດ ຕັດວ່າ "ພຣະຜູ້ເປັນເຈົ້າກັດຈານະ ອັນແທ້ຈິງເຖິງຈະ ເປັນກະສັດເມື່ອຂ້າສັດ ລັກຊັບ ປະພຶດຜິດໃນການ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄໍາຫຍາບ ເວົ້າບໍ່ມີ ສາຣະ ເປັນຜູ້ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດພະຍາບາດ ເປັນມິດສາທິດຖິ ຫລັງຈາກ ສະຫວັນຄົດແລ້ວເພິ່ງໄປບັງເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ຂ້ານ້ອຍມີຄວາມຄິດເຫັນ ໃນເລື້ອງນີ້ແນວນີ້ ອັນໜຶ່ງ ຂ້ານ້ອຍເອງກໍໄດ້ຟັງມາຈາກພຣະອະຣະຫັນທັງຫລາຍເຊັ່ນນັ້ນ"

"ດີແລ້ວ ດີແລ້ວ ມະຫາບໍພິດ ເປັນຄວາມດີທີ່ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນີ້ ແນວນັ້ນ ແລະເປັນສິ່ງທີ່ດີທີ່ພຣະອົງໄດ້ຊົງສະດັບຄວາມຂໍ້ນີ້ມາຈາກພຣະອະຣະຫັນທັງຫລາຍ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ພາມໃນໂລກນີ້ ໆລໆ ແພດ ໃນໂລກນີ້ ໆລໆ ສູດໃນໂລກນີ້ ເມື່ອຂ້າສັດ ລັກຊັບ ປະພຶດຜິດໃນການ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄໍາ

ທຍາບ ເວົ້າບໍ່ມີສາຣະ ເປັນຜູ້ເພ່ງເລັງຍາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດ ພະຍາບາດ ເປັນມິດສາທິດຖິ ຫລັງຈາກຕາຍແລ້ວເພິ່ງໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຣົກ ແມ່ນບໍ ຫຼືພຣະອົງຊົງເຂົ້າພຣະທະໄທໃນເລື້ອງນີ້ວ່າແນວໃດ”

“ພຣະຜູ້ເປັນເຈົ້າກັດຈານະ ອັນແທ້ຈິງເຖິງຈະເປັນສູດ ເມື່ອຂ້າສັດ ລັກຊັບ ປະພຶດ ຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳທຍາບ ເວົ້າບໍ່ມີສາຣະ ເປັນຜູ້ເພ່ງເລັງຍາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດພະຍາບາດ ເປັນມິດສາທິດຖິ ຫລັງຈາກຕາຍແລ້ວເພິ່ງໄປເກີດໃນອະບາຍທຸຄະຕິ ວິນິບາດ ນະຣົກ ຂ້ານ້ອຍມີຄວາມຄິດເຫັນໃນເລື້ອງນີ້ແນວນີ້ ອັນໜຶ່ງ ຂ້ານ້ອຍເອງກໍໄດ້ຟັງມາ ຈາກພຣະອະຣະຫັນທັງຫລາຍເຊັ່ນນັ້ນ”

“ດີແລ້ວ ດີແລ້ວ ມະຫາບໍພິດ ເປັນຄວາມດີທີ່ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນີ້ແນວນັ້ນ ແລະເປັນສິ່ງທີ່ດີທີ່ພຣະອົງໄດ້ຊົງສະດັບຄວາມຂໍ້ນີ້ມາຈາກພຣະອະຣະຫັນທັງຫລາຍ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ຖ້າເມື່ອເປັນແນວນີ້ ວັນນະທັງ ໔ ຈຳພວກນີ້ຍ່ອມເປັນຜູ້ສະເໝີກັນ ແມ່ນບໍ ຫຼືພຣະອົງຊົງເຂົ້າພຣະທະໄທໃນວັນນະທັງ ໔ ຈຳພວກນີ້ວ່າແນວໃດ”

“ພຣະຜູ້ເປັນເຈົ້າກັດຈານະ ເມື່ອເປັນແນວນີ້ ວັນນະ ໔ ຈຳພວກນີ້ກໍສະເໝີກັນໝົດແນ່ນອນ ໃນວັນນະ ໔ ຈຳພວກນີ້ ຂ້ານ້ອຍບໍ່ເຫັນຄວາມແຕກຕ່າງອັນໃດກັນເລີຍ”

“ມະຫາບໍພິດ ໂດຍປະຣິຍາຍນີ້ ພຣະອົງຊົງຮູ້ເຫັນວ່າ ວາທະທີ່ພວກພາມ ກ່າວວ່າ “ວັນນະທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ວັນນະອື່ນຊົ່ວ ຯລຯ ເປັນທາຍາດ ຂອງພົມ” ນັ້ນເປັນຄຳໂຄສະນາໃນໂລກນີ້ທໍ່ນັ້ນ”

[๓๘๐] ທ່ານພຣະມະຫາກັດຈານະຖວາຍພຣະພອນວ່າ “ມະຫາບໍພິດ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ກະສັດໃນໂລກນີ້ເພິ່ງເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳທຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຍາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຫລັງຈາກຕາຍແລ້ວເພິ່ງໄປເກີດໃນສຸຄະຕິໂລກສະຫວັນ ແມ່ນບໍ? ຫຼື ພຣະອົງຊົງເຂົ້າພຣະທະໄທໃນເລື້ອງນີ້ວ່າແນວໃດ”

ພຣະເຈົ້າມະທຸຣະ ອະວັນຕິບຸດ ຕັດວ່າ “ພຣະຜູ້ເປັນເຈົ້າກັດຈານະ ອັນແທ້ຈິງເຖິງຈະເປັນກະສັດ ເມື່ອເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳທຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຍາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິ

ດບໍ່ພະຍາບາດ ເປັນສຳມາທິດຖິ ຫລັງຈາກຕາຍແລ້ວເພິ່ງໄປເກີດໃນສຸຄະຕິໂລກສະຫວັນ ຂ້ານ້ອຍມີຄວາມເຫັນໃນເລື້ອງນີ້ແບວນີ້ ອັນໜຶ່ງ ຂ້ານ້ອຍເອງກໍໄດ້ຟັງເລື້ອງນີ້ມາຈາກພຣະອະຣະຫັນທັງຫລາຍ ເຊັ່ນນັ້ນ"

"ດີແລ້ວ ດີແລ້ວ ມະຫາບໍພິດ ເປັນຄວາມດີທີ່ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນີ້ແບວນັ້ນ ແລະເປັນສິ່ງທີ່ດີທີ່ພຣະອົງໄດ້ຊົງສະດັບຄວາມຂໍ້ນີ້ມາຈາກພຣະອະຣະຫັນທັງຫລາຍ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແບວໃດ ພາມໃນໂລກນີ້ ຯລຯ ແພດໃນໂລກນີ້ ຯລຯ ສູດໃນໂລກນີ້ ເມື່ອເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຫລັງຈາກຕາຍແລ້ວເພິ່ງໄປເກີດໃນສຸຄະຕິໂລກສະຫວັນ ແມ່ນບໍ? ຫຼື ພຣະອົງຊົງເຂົ້າພຣະທະໄທໃນເລື້ອງນີ້ວ່າແບວໃດ"

"ແມ່ນ ພຣະຜູ້ເປັນເຈົ້າກັດຈານະ ອັນແທ້ຈິງເຖິງຈະເປັນພາມ ຯລຯ ເປັນແພດ ຯລຯ ເປັນສູດ ເມື່ອເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດ ຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຫລັງຈາກຕາຍແລ້ວເພິ່ງໄປເກີດໃນສຸຄະຕິໂລກສະຫວັນ ຂ້ານ້ອຍມີຄວາມເຫັນໃນເລື້ອງນີ້ແບວນີ້ ອັນໜຶ່ງ ຂ້ານ້ອຍເອງກໍໄດ້ຟັງເລື້ອງນີ້ມາຈາກພຣະອະຣະຫັນທັງຫລາຍເຊັ່ນນັ້ນ"

"ດີແລ້ວ ດີແລ້ວ ມະຫາບໍພິດ ເປັນຄວາມດີທີ່ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນີ້ແບວນັ້ນ ແລະ ເປັນສິ່ງທີ່ດີທີ່ພຣະອົງໄດ້ຊົງສະດັບຄວາມຂໍ້ນີ້ມາຈາກພຣະອະຣະຫັນທັງຫລາຍ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແບວໃດ ຖ້າເມື່ອເປັນແບວນີ້ ວັນນະ ໔ ຈຳພວກນີ້ຍ່ອມເປັນຜູ້ສະເໝີກັນ ແມ່ນບໍ? ຫຼື ພຣະອົງຊົງເຂົ້າພຣະທະໄທໃນວັນນະ ໔ ຈຳພວກນີ້ວ່າ ແບວໃດ"

"ພຣະຜູ້ເປັນເຈົ້າກັດຈານະ ເມື່ອເປັນແບວນີ້ ວັນນະ ໔ ຈຳພວກນີ້ກໍສະເໝີກັນໝົດແນ່ນອນ ໃນວັນນະ ໔ ຈຳພວກນີ້ ຂ້ານ້ອຍບໍ່ເຫັນຄວາມແຕກຕ່າງອັນໃດກັນເລີຍ"

"ມະຫາບໍພິດ ໂດຍປະຣິຍາຍນີ້ ພຣະອົງຊົງຮູ້ເທີ້ນວ່າ ວາທະທີ່ພວກພາມ ກ່າວວ່າ "ວັນນະທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ວັນນະອື່ນຊົ່ວ ຯລຯ ເປັນທາຍາດຂອງພົມ" ນັ້ນເປັນຄຳໂຄສະນາໃນໂລກນີ້ທໍ່ນັ້ນ"

[໓໔໑] ທ່ານພຣະມະຫາກັດຈານະຖວາຍພຣະພອນວ່າ "ມະຫາບໍພິດ ພຣະອົງຊົງເຂົ້າ

ພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ກະສັດໃນໂລກນີ້ເພິ່ງເຈາະປ່ອງຈອບລັກ ປຸ້ນເຮືອນຫລັງດຽວ ດັກຈີ້ໃນທາງປ່ຽວ ເປັນຊູ້ ຖ້າຣາຊະບຸຣຸດທັງຫລາຍຈັບເຂົາໄດ້ແລ້ວ ເພິ່ງສະແດງວ່າ "ຂໍເດຊະ ຜູ້ນີ້ເປັນໂຈນປະພຶດຜິດຕໍ່ພຣະອົງ ພຣະອົງຊົງປະສົງຈະລົງພຣະຣາຊະ ອາດຍາສະຖານໃດແກ່ໂຈນນັ້ນ ຂໍຈົ່ງຊົງໂປດໃຫ້ລົງພຣະຣາຊະອາດຍາສະຖານນັ້ນເທີ້ນ" ພຣະອົງຈະເພິ່ງໂຜດໃຫ້ເຮັດແນວໃດກັບໂຈນນັ້ນ"

ພຣະເຈົ້າມະທຸຣະ ອະວັນຕີບຸດ ຕັດວ່າ "ພຣະຜູ້ເປັນເຈົ້າກັດຈານະ ຂ້ານ້ອຍກໍຕ້ອງໃຫ້ປະຫານ ໃຫ້ຜ່າອົກ ໃຫ້ເນຣະເທດ ຫຼືເຮັດຕາມສົມຄວນແກ່ເຫດ ຂໍ້ນັ້ນຍ້ອນເຫດໃດ ຍ້ອນສົມຍານາມ ວ່າກະສັດຂອງເຂົາແຕ່ກ່ອນນັ້ນຫາຍໄປແລ້ວ(ບັດນີ້) ເຂົາໄດ້ຊື່ວ່າ "ເປັນໂຈນທໍ່ນັ້ນ"

"ມະຫາບໍພິດ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ພາມໃນໂລກນີ້ ຯລຯ ແພດໃນໂລກນີ້ ຯລຯ ສູດໃນໂລກນີ້ເພິ່ງເຈາະປ່ອງຈອບລັກ ປຸ້ນເຮືອນຫລັງດຽວ ດັກຈີ້ໃນທາງປ່ຽວ ເປັນຊູ້ ຖ້າຣາຊະບຸຣຸດທັງຫລາຍຈັບເຂົາໄດ້ແລ້ວ ເພິ່ງສະແດງວ່າ "ຂໍເດຊະ ຜູ້ນີ້ເປັນໂຈນປະພຶດຜິດຕໍ່ພຣະອົງ ພຣະອົງຊົງປະສົງຈະລົງພຣະຣາຊະອາດຍາສະຖານໃດແກ່ໂຈນນັ້ນ ຂໍຈົ່ງຊົງໂປດໃຫ້ລົງພຣະຣາຊະອາດຍາສະຖານນັ້ນເທີ້ນ" ພຣະອົງຈະເພິ່ງໂຜດໃຫ້ເຮັດແນວໃດກັບໂຈນນັ້ນ"

"ພຣະຜູ້ເປັນເຈົ້າກັດຈານະ ຂ້ານ້ອຍກໍຕ້ອງໃຫ້ປະຫານ ໃຫ້ຜ່າອົກ ໃຫ້ເນຣະເທດ ຫຼືເຮັດຕາມສົມຄວນແກ່ເຫດ ຂໍ້ນັ້ນຍ້ອນເຫດໃດ ຍ້ອນສົມຍານາມວ່າສູດຂອງເຂົາແຕ່ກ່ອນນັ້ນຫາຍໄປແລ້ວ ເຂົາໄດ້ຊື່ວ່າ "ເປັນໂຈນທໍ່ນັ້ນ"

"ມະຫາບໍພິດ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ຖ້າເມື່ອເປັນແນວນີ້ ວັນນະ ໔ ຈຳພວກນີ້ ຍ່ອມເປັນຜູ້ສະເໝີກັນ ແມ່ນບໍ? ຫຼື ພຣະອົງຊົງເຂົ້າພຣະທະໄທ ໃນວັນນະ ໔ ຈຳພວກນີ້ວ່າແນວໃດ"

"ພຣະຜູ້ເປັນເຈົ້າກັດຈານະ ເມື່ອເປັນແນວນີ້ ວັນນະ ໔ ຈຳພວກນີ້ກໍສະເໝີກັນໝົດແນ່ນອນ ໃນວັນນະ ໔ ຈຳພວກນີ້ ຂ້ານ້ອຍບໍ່ເຫັນຄວາມແຕກຕ່າງອັນໃດກັນເລີຍ"

"ມະຫາບໍພິດ ໂດຍປະຣິຍາຍນີ້ ພຣະອົງຊົງຮູ້ເທີ້ນວ່າ ວາທະທີ່ພວກພາມ ກ່າວວ່າ "ວັນນະທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ວັນນະອື່ນຊົ່ວ ຯລຯ ເປັນທາຍາດ ຂອງພົມ" ນັ້ນເປັນຄຳໂຄສະນາໃນໂລກນີ້ທໍ່ນັ້ນ"

[໓໔໔] ທ່ານພຣະມະຫາກັດຈານະຖວາຍພຣະພອນວ່າ "ມະຫາບໍພິດ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ກະສັດໃນໂລກນີ້ເພິ່ງປົງພຣະເກສາແລະພຣະມັດສຸ ນຸ່ງຫົ່ມ

ຜ້າກາສາວະພັດສະເດັດອອກຈາກວັງບວດເປັນບັນພະຊິດ ຊົງງົດເວັ້ນຈາກການຂ້າສັດ ງົດເວັ້ນຈາກການລັກຊັບ ງົດເວັ້ນຈາກການເວົ້າຕົວະ ບໍ່ບໍຣິໂພກໃນຣາຕີ ສັນພັດຕາຫານຄາບດຽວ ເປັນພົມມະຈາຣີ ມີສິນ ມີກັນລະຍານະທຳ ພຣະອົງຈະຊົງເຮັດແນວໃດກັບຣາຊະບັນພະຊິດນັ້ນ”

ພຣະເຈົ້າມະທຸຣະ ອະວັນຕີບຸດ ຕັດວ່າ “ພຣະຜູ້ເປັນເຈົ້າກັດຈານະ ຂ້ານ້ອຍຕ້ອງຂາບໄຫວ້ ລຸກຮັບ ເຊື້ອເຊີນດ້ວຍອາສະນະ ຫຼືເຈາະຈົງນິມົນຣາຊະບັນພະຊິດນັ້ນດ້ວຍຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດບໍຣິຂານ໑ ຈັດການອາຣັກຂາ ຄຸ້ມຄອງ ປ້ອງກັນທ່ານຕາມຄວາມເໝາະສົມ ຂໍ້ນັ້ນຍ້ອນເຫດໃດ ຍ້ອນສົມຍານາມວ່າກະສັດຂອງທ່ານແຕ່ກ່ອນນັ້ນຫາຍໄປແລ້ວ ທ່ານໄດ້ຊື່ວ່າ “ສະມະນະທີ່ນັ້ນ”

“ມະຫາບໍພິດ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ພາມໃນໂລກນີ້ ໆລໆ ແພດໃນໂລກນີ້ ໆລໆ ສູດໃນໂລກນີ້ແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ ງົດເວັ້ນຈາກການຂ້າສັດ ງົດເວັ້ນຈາກການລັກຊັບ ງົດເວັ້ນຈາກການເວົ້າຕົວະ ບໍ່ບໍຣິໂພກໃນຣາຕີ ສັນພັດຕາຫານຄາບດຽວ ເປັນພົມມະຈາຣີ ມີສິນ ມີກັນລະຍານະທຳ ພຣະອົງຈະຊົງເຮັດແນວໃດກັບບັນພະຊິດນັ້ນ”

“ພຣະຜູ້ເປັນເຈົ້າກັດຈານະ ຂ້ານ້ອຍຕ້ອງຂາບໄຫວ້ ລຸກຮັບ ເຊື້ອເຊີນດ້ວຍອາສະນະ ຫຼືເຈາະຈົງນິມົນທ່ານດ້ວຍຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ ຈັດການອາຣັກຂາ ຄຸ້ມຄອງ ປ້ອງກັນທ່ານຕາມຄວາມເໝາະສົມ ຂໍ້ນັ້ນຍ້ອນເຫດໃດ ຍ້ອນສົມຍານາມວ່າສູດຂອງທ່ານແຕ່ກ່ອນນັ້ນຫາຍໄປແລ້ວ ທ່ານໄດ້ຊື່ວ່າ “ສະມະນະທີ່ນັ້ນ”

“ມະຫາບໍພິດ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ຖ້າເມື່ອເປັນແນວນີ້ວັນນະ ໔ ຈຳພວກນີ້ ຍ່ອມເປັນຜູ້ສະເໝີກັນ ແມ່ນບໍ? ຫຼື ພຣະອົງຊົງເຂົ້າພຣະທະໄທໃນວັນນະ ໔ ຈຳພວກນີ້ ວ່າແນວໃດ”

“ພຣະຜູ້ເປັນເຈົ້າກັດຈານະ ເມື່ອເປັນແນວນີ້ ວັນນະ ໔ ຈຳພວກນີ້ ກໍສະເໝີກັນໝົດແນ່ນອນ ໃນວັນນະ ໔ ຈຳພວກນີ້ ຂ້ານ້ອຍບໍ່ເຫັນຄວາມແຕກຕ່າງອັນໃດກັນເລີຍ”

“ມະຫາບໍພິດ ໂດຍປະຣິຍາຍນີ້ ພຣະອົງຊົງຮູ້ເທີ້ນວ່າ ວາທະທີ່ພວກພາມ ກ່າວວ່າ “ວັນນະທີ່ປະເສີດທີ່ສຸດຄືພາມທີ່ນັ້ນ ວັນນະອື່ນຊົ່ວ ວັນນະທີ່ຂາວ ຄືພາມທີ່ນັ້ນ ວັນນະອື່ນດຳ ພາມທີ່ນັ້ນບໍລິສຸດ ຜູ້ທີ່ບໍ່ແມ່ນພາມບໍ່ ບໍລິສຸດ ພາມທີ່ນັ້ນເປັນບຸດ ເປັນໂອຣົດ ເກີດຈາກໂອດຂອງພົມ ເກີດຈາກ ພົມ ເປັນຜູ້ທີ່ພົມສ້າງຂຶ້ນ ເປັນທາຍາດຂອງພົມ” ນັ້ນເປັນຄຳໂຄສະນາໃນໂລກນີ້ທີ່ນັ້ນ”

## ພຣະເຈົ້າມະທຸຣະສະແດງຕົນເປັນອຸປາສົກ

[໓໔໓] ເມື່ອທ່ານພຣະມະຫາກັດຈານະຖວາຍພຣະພອນແນວນີ້ແລ້ວ ພຣະເຈົ້າມະທຸຣະອະວັນຕິບຸດໄດ້ຕັດວ່າ "ພຣະຜູ້ເປັນເຈົ້າກັດຈານະ ພາສິດຂອງທ່ານຊັດເຈນນ່ອນຫຼາຍ ພຣະຜູ້ເປັນເຈົ້າກັດຈານະ ພາສິດຂອງທ່ານຊັດເຈນນ່ອນຫຼາຍ ພຣະຜູ້ເປັນເຈົ້າກັດຈານະປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫລົງທາງ ຫຼືເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້ານ້ອຍຂໍເຖິງພຣະຜູ້ເປັນເຈົ້າກັດຈານະພ້ອມທັງພຣະທຳແລະພຣະສົງເປັນ ສະຣະນະ ຂໍພຣະຜູ້ເປັນເຈົ້າກັດຈານະຈົ່ງຈືຂ້ານ້ອຍວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ຈົນຕະຫຼອດຊີວິດ"

ທ່ານພຣະມະຫາກັດຈານະຖວາຍພຣະພອນວ່າ "ມະຫາບໍພິດ ພຣະອົງຢ່າຊົງເຖິງອາດຕະມາພາບເປັນສະຣະນະເລີຍ ຂໍຈົ່ງຊົງເຖິງພຣະຜູ້ມີພຣະພາກເຈົ້າຜູ້ເປັນສະຣະນະຂອງອາດຕະມາພາບເປັນສະຣະນະເທີ້ນ"

ພຣະເຈົ້າມະທຸຣະ ອະວັນຕິບຸດ ຕັດຖາມວ່າ "ພຣະຜູ້ເປັນເຈົ້າກັດຈານະ ບັດນີ້ ພຣະຜູ້ມີພຣະພາກຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນປະທັບຢູ່ທີ່ໃດ"

ທ່ານພຣະມະຫາກັດຈານະຖວາຍພຣະພອນວ່າ "ມະຫາບໍພິດ ບັດນີ້ ພຣະຜູ້ມີພຣະພາກເຈົ້າ ຜູ້ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ສະເດັດປະຣິນິບພານສາແລ້ວ"

ພຣະເຈົ້າມະທຸຣະ ອະວັນຕິບຸດ ຕັດວ່າ "ພຣະຜູ້ເປັນເຈົ້າກັດຈານະ ຖ້າພວກຂ້ານ້ອຍໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນປະທັບຢູ່ໄກເຖິງ ໑໐ ໂຍດ ພວກຂ້ານ້ອຍກໍຕ້ອງໄປເຝົ້າ ພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ແມ່ນສິ້ນທາງ ໑໐ ໂຍດ ຖ້າພວກຂ້ານ້ອຍໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນປະທັບຢູ່ໄກເຖິງ ໒໐ ໂຍດ ຯລຯ ໓໐ ໂຍດຯລຯ ໔໐ ໂຍດຯລຯ ໕໐ ໂຍດ ພວກຂ້ານ້ອຍກໍຕ້ອງໄປເຝົ້າພຣະຜູ້ມີພຣະພາກເຈົ້າຜູ້ເປັນ ພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ແມ່ນສິ້ນທາງ ໕໐ ໂຍດ

ພຣະຜູ້ເປັນເຈົ້າກັດຈານະ ຖ້າພວກຂ້ານ້ອຍໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນປະທັບຢູ່ໄກເຖິງ ໑໐໐ ໂຍດ ພວກຂ້ານ້ອຍກໍຕ້ອງໄປເຝົ້າພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ເຖິງແມ່ນວ່າຈະໄກຈັກ ໑໐໐ ໂຍດ ແຕ່ຍ້ອນເຫດທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ສະເດັດປະຣິນິບພານສາແລ້ວ ພວກຂ້ານ້ອຍຂໍເຖິງພຣະຜູ້

ມີພຣະພາກແມ່ນສະເດັດປະຣິນິບພານແລ້ວ ພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍພຣະຜູ້ເປັນເຈົ້າກັດຈານະຈົ່ງຈືຂ້ານ້ອຍວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" ດັ່ງນີ້ແລ

**ມະທຸຣະສູດທີ ໔ ຈົບ**

# ໕. ໂພທິຣາດຊະກຸມານສູດ

## ວ່າດ້ວຍໂພທິຣາດຊະກຸມານ

[໓໒໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ເພສະກະລາມີ້ ສະຖານທີ່ໃຫ້ອະໄພໝູ່ເນື້ອເຂດນະຄອນສຸງສຸມາຣະຄິຣະ ແຄວັນພັກຄະ ສະໄໝນັ້ນແລ ຜາສາດຊື່ໂກກະນຸດຂອງພຣະຣາດຊະກຸມານພຣະນາມວ່າໂພທິ ສ້າງສຳເລັດແລ້ວໃໝ່ ໆ ສະມະນະ ພາມ ຫຼື ມະນຸດຄົນໃດຄົນໜຶ່ງຍັງບໍ່ໄດ້ເຂົ້າໄປຢູ່ອາໄສ ຕໍ່ມາ ໂພທິຣາດຊະກຸມານຮັບສັ່ງຮຽກມານົບຊື່ ສັນຊິກາບຸດມາ ຕັດວ່າ

"ມາເທີ້ນ ສັນຊິກາບຸດເພື່ອນຮັກ ທ່ານຈົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຂາບພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ແລ້ວທູນຖາມເຖິງພຣະສຸກພາບ ຄວາມມີພຣະໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍຕາມຄຳຂອງເຮົາວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໂພທິຣາດຊະກຸມານ ຂໍຂາບພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ທູນຖາມເຖິງພຣະສຸກພາບ ຄວາມມີພຣະໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ" ແລະຈົ່ງຂາບທູນແນວນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າພ້ອມທັງພິກຂຸສົງໂຜດຮັບນິມົນສັນ ພັດຕາຫານຂອງໂພທິຣາດຊະກຸມານໃນມືອື່ນນີ້ດ້ວຍເທີ້ນ"

ມານົບສັນຊິກາບຸດທູນຮັບສະໜອງພຣະດຳຣັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທິງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ ພຣະໂຄດົມຜູ້ຈະເລີນ ໂພທິຣາດຊະກຸມານຂໍຂາບພຣະບາດທັງສອງຂອງພຣະໂຄດົມ ຜູ້ຈະເລີນ ດ້ວຍຂະໜ່ອມ ທູນຖາມເຖິງພຣະສຸກພາບ ຄວາມມີພຣະໂຣຄາພາດໜ້ອຍ

ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ ແລະ ຂາບທູນແນວນີ້ວ່າ "ຂໍພຣະໂຄດົມຜູ້ຈະເລີນ ພ້ອມດ້ວຍພິກຂຸສົງຊົງຮັບນິມົນສັນພັດຕາຫານຂອງໂພທິຣາດຊະກຸມານໃນມື້ອື່ນນີ້ດ້ວຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ ເວລານັ້ນ ມານົບສັນຊິກາບຸດ ຮູ້ອາການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງລຸກຈາກບ່ອນນັ່ງເຂົ້າໄປເຝົ້າໂພທິຣາດຊະກຸມານ ຮອດບ່ອນຢູ່ແລ້ວຂາບທູນ ວ່າ

"ຂ້າພຣະອົງໄດ້ຂາບທູນພຣະໂຄດົມຜູ້ຈະເລີນພຣະອົງນັ້ນ ຕາມຮັບສັ່ງຂອງພຣະອົງວ່າ "ຂ້າແດ່ ພຣະໂຄດົມຜູ້ຈະເລີນ ໂພທິຣາດຊະກຸມານຂໍຂາບພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ທູນຖາມເຖິງພຣະສຸກພາບ ຄວາມມີພຣະໂຣຄາພາດໜ້ອຍ ເບົາຕົນໂຕມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ" ແລະ ຂາບທູນແນວນີ້ວ່າ "ຂໍພຣະໂຄດົມຜູ້ຈະເລີນພ້ອມດ້ວຍພິກຂຸສົງຊົງຮັບນິມົນສັນພັດຕາຫານຂອງໂພທິຣາດຊະກຸມານໃນມື້ອື່ນນີ້ດ້ວຍເທີ້ນ" ແລະພຣະສະມະນະໂຄດົມຊົງຮັບນິມົນແລ້ວ ໂດຍຂ້ານ້ອຍ"

## ພຣະພຸດທະເຈົ້າບໍ່ຊົງຢຽບຜ້າຂາວ

[໓໔໕] ຄັ້ງນັ້ນ ເມື່ອຜ່ານຄືນນັ້ນໄປ ໂພທິຣາດຊະກຸມານຮັບສັ່ງໃຫ້ຈັດກຽມຂອງ ຫຍ້ຳຂອງຂ້ອຍອັນປະນີດໄວ້ໃນພຣະນິເວດຂອງພຣະອົງ ແລະ ຮັບສັ່ງໃຫ້ປູລາດໂກກະນຸດຜາສາດດ້ວຍຜ້າຂາວເຖິງບັນໄດຂັ້ນລຸ່ມສຸດ ຮັບສັ່ງຮຽກມານົບສັນຊິກາບຸດມາຕັດວ່າ

"ມາເທີ້ນ ສັນຊິກາບຸດເພື່ອນຮັກ ທ່ານຈົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວຂາບທູນພັດຕະການວ່າ "ໄດ້ເວລາແລ້ວ ຂ້ານ້ອຍ ພັດຕາຫານສຳເລັດແລ້ວ"

ມານົບສັນຊິກາບຸດທູນຮັບສະໜອງພຣະດຳຣັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຂາບທູນພັດຕະການວ່າ "ໄດ້ເວລາແລ້ວ ຂ້ານ້ອຍ ພັດຕາຫານສຳເລັດແລ້ວ"

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກຖືບາດ ແລະ ຈີວອນສະເດັດເຂົ້າໄປສູ່ພຣະຣາຊະນິເວດຂອງໂພທິຣາດຊະກຸມານ ຂະນະນັ້ນ ໂພທິຣາດຊະກຸມານຊົງຢືນຖ້າ ຮັບສະເດັດພຣະຜູ້ມີພຣະພາກເຈົ້າຢູ່ທີ່ນອົກຊຸ້ມປະຕູ ໄດ້ຊົງເຫັນພຣະຜູ້ມີພຣະພາກເຈົ້າກຳລັງສະເດັດມາແຕ່ໄກ ຈຶ່ງສະເດັດອອກໄປຕ້ອນຮັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວສະເດັດນຳໜ້າເຂົ້າໄປຈົນເຖິງໂກກະນຸດຜາສາດ ເມື່ອເຖິງບັນໄດຂັ້ນລຸ່ມສຸດ ພຣະຜູ້ມີພຣະພາກເຈົ້າຊົງຢຸດ ໂພທິຣາດຊະກຸມານ ຈຶ່ງຂາບທູນວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າຊົງຢຽບຜ້າຂາວສະເດັດເຂົ້າໄປເທີ້ນ

ຂໍພຣະສຸຄົຄເຈົ້າຊົງຢຽບຜ້າຂາວສະເດັດເຂົ້າໄປເທີ້ນ ຂໍ້ນີ້ຈະເພິ່ງເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອສຸກ ແກ່ຂ້ານ້ອຍຕະຫຼອດການລະນານ ຂ້ານ້ອຍ"

ເມື່ອໂພທິຣາດຊະກຸມານຂາບທູນແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າກໍຊົງນິ່ງ

ແມ່ນເທື່ອທີ ໔ ໂພທິຣາດຊະກຸມານກໍຂາບທູນວ່າ "ຂໍພຣະຜູ້ມີພຣະພາກເຈົ້າຊົງຢຽບຜ້າຂາວ ສະເດັດເຂົ້າໄປເທີ້ນ ຂໍພຣະສຸຄົຄເຈົ້າຊົງຢຽບຜ້າຂາວສະເດັດເຂົ້າໄປເທີ້ນ ຂໍ້ນີ້ຈະເພິ່ງເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອສຸກ ແກ່ຂ້ານ້ອຍຕະຫຼອດການລະນານ ຂ້ານ້ອຍ"

ເມື່ອໂພທິຣາດຊະກຸມານຂາບທູນແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າກໍຊົງນິ່ງ

ແມ່ນເທື່ອທີ ໓ ໂພທິຣາດຊະກຸມານກໍຂາບທູນວ່າ "ຂໍພຣະຜູ້ມີພຣະພາກເຈົ້າຊົງຢຽບຜ້າຂາວ ສະເດັດເຂົ້າໄປເທີ້ນ ຂໍພຣະສຸຄົຄເຈົ້າຊົງຢຽບຜ້າຂາວສະເດັດເຂົ້າໄປເທີ້ນ ຂໍ້ນີ້ຈະເພິ່ງເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອສຸກ ແກ່ຂ້ານ້ອຍຕະຫຼອດການລະນານ ຂ້ານ້ອຍ"

[໓໔໖] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງເຫຼືອດຕາເບິ່ງທ່ານພຣະອານົນ ຈາກນັ້ນທ່ານພຣະອານົນໄດ້ທູນຕອບໂພທິຣາດຊະກຸມານວ່າ "ພຣະຣາດຊະກຸມານຈົ່ງເກັບຜ້າຂາວສາເທີ້ນ ພຣະຜູ້ມີພຣະພາກເຈົ້າບໍ່ຊົງຢຽບຜ້າຂາວ ພຣະຕະຖາຄົດຊົງເຫັນແກ່ປະຊຸມຊົນຜູ້ເກີດໃນພາຍຫລັງ"

ໂພທິຣາດຊະກຸມານຮັບສັ່ງໃຫ້ເກັບຜ້າຂາວ ແລ້ວຮັບສັ່ງໃຫ້ປູອາສະນະທີ່ໂກກະນຸດຜາສາດຊັ້ນເທິງ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຂຶ້ນໂກກະນຸດຜາສາດ ແລ້ວປະທັບນັ່ງເທິງພຸດທະອາດ ທີ່ປູລາດໄວ້ແລ້ວພ້ອມດ້ວຍພິກຂຸສົງ ໂພທິຣາດຊະກຸມານຊົງອັງຄາດພິກຂຸສົງມີພຣະພຸດທະເຈົ້າເປັນປະມຸກ ຖວາຍຂອງຫຍໍ້າຂອງຂ້ອຍອັນປະນີດຈົນອີ່ມໜຳດ້ວຍພຣະອົງເອງ ຊົງຮູ້ວ່າພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດລະພຣະຫັດຈາກບາດແລ້ວ ຈຶ່ງເລືອກປະທັບນັ່ງອາສະນະທີ່ສົມຄວນ ທີ່ໃດທີ່ໜຶ່ງເຊິ່ງຕ່ຳກວ່າ ແລ້ວໄດ້ຂາບທູນວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍມີຄວາມເຫັນແນວນີ້ວ່າ "ບຸກຄົນຈະບໍ່ປະສົບຄວາມສຸກດ້ວຍຄວາມສຸກ ແຕ່ບຸກຄົນຈະປະສົບຄວາມສຸກດ້ວຍຄວາມທຸກທໍ່ນັ້ນ"

## ພຸດທະປະຫວັດຕອນພໍ່າເພັງສະມາບັດ

## ໃນສຳນັກອາລາຣະດາບົດ

[໓໔໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຣາດຊະກຸມານ ກ່ອນການຕັດສະຣູ້ ແມ່ນອາດຕະມາພາບ ຍັງເປັນໂພທິສັຕວ໌ ຍັງບໍ່ໄດ້ຕັດສະຣູ້ ໄດ້ມີຄວາມຄິດແນວນີ້ວ່າ "ບຸກຄົນຈະບໍ່ປະສົບ

ຄວາມສຸກ ດ້ວຍຄວາມສຸກ ແຕ່ບຸກຄົນຈະປະສົບຄວາມສຸກໄດ້ດ້ວຍຄວາມທຸກທີ່ນັ້ນ" ໃນການຕໍ່ມາ ອາດຕະມາພາບຍັງໜຸ່ມແໜ້ນ ແຂງແຮງ ມີເກສາດຳປອດ ຢູ່ໃນປະຖົມວັຍ ເມື່ອພຣະຣາຊະມານດາແລະພຣະຣາຊະບິດາບໍ່ຊົງປາຖະໜາຈະໃຫ້ຜະນວຊ ມີພຣະພັກນອງດ້ວຍນ້ຳພຣະເນດຊົງກັນແສງຢູ່ ຈຶ່ງແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກວັງບວດເປັນ ບັນພະຊິດ ເມື່ອບວດແລ້ວກໍສະແຫວງຫາວ່າອັນໃດເປັນກຸສົນ ຂະນະທີ່ສະແຫວງຫາທາງອັນປະເສີດຄືຄວາມສະງົບເຊິ່ງບໍ່ມີທາງອື່ນຍິ່ງກວ່າ ໄດ້ເຂົ້າໄປຫາອາລາຣະດາບົດ ກາລາມະໂຄດ ແລ້ວກ່າວວ່າ "ທ່ານກາລາມະ ຂ້າພະເຈົ້າປາຖະໜາຈະປະພຶດພົມມະຈັນໃນທຳວິໄນນີ້"

ເມື່ອອາດຕະມາພາບກ່າວແນວນີ້ ອາລາຣະດາບົດ ກາລາມະໂຄດຈຶ່ງກ່າວກັບອາດຕະມາພາບວ່າ "ເຊີນທ່ານຢູ່ກ່ອນ ທຳນີ້ກໍເປັນເຊັ່ນດຽວກັບທຳທີ່ວິນຍູຊົນຈະເພິ່ງເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງ ຕາມແບບອາຈານຂອງຕົນ ເຂົ້າເຖິງຢູ່ໄດ້ໃນເວລາບໍ່ດົນ" ຈາກນັ້ນ ບໍ່ດົນອາດຕະມາພາບກໍຮຽນຮູ້ທຳນັ້ນໄດ້ຢ່າງວ່ອງໄວ ຊົ່ວຂະນະອັດປາກຈົບເຈລະຈາປາໄສ ທີ່ນັ້ນ ກໍກ່າວຍານວາທະ໑ແລະເຖຣວາທະໄດ້ ທັງອາດຕະມາພາບແລະຜູ້ອື່ນກໍຮູ້ຊັດວ່າ "ເຮົາຮູ້ ເຮົາເຫັນ" ອາດຕະມາພາບຈຶ່ງຄິດວ່າ "ອາລາຣະດາບົດ ກາລາມະໂຄດປະກາດທຳນີ້ດ້ວຍເຫດພຽງຄວາມເຊື່ອແນວດຽວວ່າ "ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ກໍເປັນໄປບໍ່ໄດ້ ແຕ່ອາລາຣະດາບົດ ກາລາມະໂຄດ ຍັງຮູ້ ຍັງເຫັນທຳນີ້ດ້ວຍປັນຍາອັນຍິ່ງເອງແນ່ນອນ"

ຈາກນັ້ນ ອາດຕະມາພາບຈຶ່ງເຂົ້າໄປຫາອາລາຣະດາບົດ ກາລາມະໂຄດແລ້ວຖາມວ່າ "ທ່ານ ກາລາມະ ທ່ານປະກາດທຳນີ້ວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງທີ່ໃດ?"

ເມື່ອອາດຕະມາພາບຖາມແນວນີ້ ອາລາຣະດາບົດ ກາລາມະໂຄດຈຶ່ງປະກາດອາກິນຈັນຍາຍະຕະນະສະມາບັດແກ່ອາດຕະມາພາບ ອາດຕະມາພາບຈຶ່ງຄິດວ່າ "ບໍ່ແມ່ນແຕ່ອາລາຣະດາບົດກາລາມະໂຄດທີ່ນັ້ນທີ່ມີສັດທາ ແມ່ນເຮົາກໍມີສັດທາ ຯລຯ ມີວິຣິຍະ ຯລຯ ມີສະຕິ ຯລຯ ມີສະມາທິ ຯລຯ ບໍ່ແມ່ນແຕ່ອາລາຣະດາບົດ ກາລາມະໂຄດທີ່ນັ້ນທີ່ມີປັນຍາ ແມ່ນເຮົາກໍມີປັນຍາທາງທີ່ດີ ເຮົາຄວນພໍ່າເພັງພຽນເພື່ອເຮັດໃຫ້ແຈ້ງທຳທີ່ອາລາຣະດາບົດ ກາລາມະໂຄດປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ຈາກນັ້ນບໍ່ດົນ ອາດຕະມາພາບກໍເຮັດໃຫ້ແຈ້ງທຳນັ້ນດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່

ຈາກນັ້ນ ອາດຕະມາພາບຈຶ່ງເຂົ້າໄປຫາອາລາຣະດາບົດ ກາລາມະໂຄດແລ້ວຖາມວ່າ "ທ່ານກາລາມະ ທ່ານປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງທີ່ນີ້ບໍ?"

ອາລາຣະດາບົດ ກາລາມະໂຄດຕອບວ່າ "ທ່ານຜູ້ມີອາຍຸ ເຮົາປະກາດວ່າ "ຂ້າພະເຈົ້າ

ເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງທີ່ນີ້ແລ"

(ອາດຕະມາພາບຈຶ່ງກ່າວວ່າ) "ທ່ານກາລາມະ ແມ່ນຂ້າພະເຈົ້າກໍເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງທີ່ນີ້"

(ອາລາຣະດາບົດກາລາມະໂຄດກ່າວວ່າ) "ທ່ານຜູ້ມີອາຍຸ ເປັນລາບຂອງພວກຂ້າພະເຈົ້າ ພວກຂ້າພະເຈົ້າໄດ້ດີແລ້ວທີ່ໄດ້ພົບເພື່ອນພົມມະຈາຣີເຊັ່ນທ່ານ ຍ້ອນຂ້າພະເຈົ້າປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳໃດດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ທ່ານກໍເຮັດໃຫ້ແຈ້ງທຳນັ້ນດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ທ່ານເຮັດໃຫ້ແຈ້ງທຳໃດ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ຂ້າພະເຈົ້າກໍປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳນັ້ນດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ຂ້າພະເຈົ້າຮູ້ທຳໃດ ທ່ານກໍຮູ້ທຳນັ້ນ ທ່ານຮູ້ທຳໃດ ຂ້າພະເຈົ້າກໍຮູ້ທຳນັ້ນ ເປັນອັນວ່າຂ້າພະເຈົ້າເປັນເຊັ່ນໃດ ທ່ານກໍເປັນເຊັ່ນນັ້ນ ທ່ານເປັນເຊັ່ນໃດ ຂ້າພະເຈົ້າ ກໍເປັນເຊັ່ນນັ້ນ ມາເທີ້ນ ບັດນີ້ ເຮົາທັງສອງຈະຢູ່ຮ່ວມກັນບໍລິຫານຄະນະນີ້"

ຣາດຊະກຸມານ ອາລາຣະດາບົດ ກາລາມະໂຄດທັງທີ່ເປັນອາຈານຂອງອາດຕະມາພາບກໍຍ້ອງຍໍ ອາດຕະມາພາບຜູ້ເປັນສິດໃຫ້ສະເໝີກັບຕົນ ແລະ ບູຊາອາດຕະມາພາບດ້ວຍການບູຊາຢ່າງດີ ດ້ວຍປະການແນວນີ້ ແຕ່ອາດຕະມາພາບຄິດວ່າ "ທຳນີ້ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ແລະເພື່ອນິບພານ ເປັນໄປ ພຽງເພື່ອເຂົ້າເຖິງອາກິນຈັນຍາຍະຕະນະສະມາບັດທີ່ນັ້ນ" ອາດພາບບໍ່ພໍໃຈ ເບື່ອໜ່າຍທຳນັ້ນ ຈຶ່ງລາຈາກໄປ

## ໃນສຳນັກອຸທະກະດາບົດ

[๓๔๗] ຣາດຊະກຸມານ ອາດຕະມາພາບນັ້ນສະແຫວງຫາວ່າອັນໃດເປັນກຸສົນ ຂະນະທີ່ສະແຫວງຫາທາງອັນປະເສີດ ຄື ຄວາມສະງົບເຊິ່ງບໍ່ມີທາງອື່ນຍິ່ງກວ່າ ໄດ້ເຂົ້າໄປຫາອຸທະກະດາບົດ ຣາມະບຸດແລ້ວກ່າວວ່າ "ທ່ານຣາມະ ຂ້າພະເຈົ້າປາຖະໜາຈະປະພຶດພົມມະຈັນໃນທຳວິໄນນີ້"

ເມື່ອອາດຕະມາພາບກ່າວແນວນີ້ ອຸທະກະດາບົດ ຣາມະບຸດຈຶ່ງກ່າວກັບອາດຕະມາພາບວ່າ "ເຊີນທ່ານຢູ່ກ່ອນ ທຳນີ້ກໍເປັນເຊັ່ນດຽວກັບທຳທີ່ວິນຍູຊົນຈະເພິ່ງເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງ ຕາມແບບອາຈານຂອງຕົນເຂົ້າເຖິງຢູ່ໄດ້ໃນເວລາບໍ່ດົນ" ຈາກນັ້ນບໍ່ດົນ ອາດຕະມາພາບກໍຮຽນຮູ້ທຳນັ້ນໄດ້ຢ່າງວ່ອງໄວ ຊົ່ວຂະນະອັດປາກຈົບເຈລະຈາປາໄສທີ່ນັ້ນ ກໍກ່າວຍານວາທະ ແລະເຖຣວາທະໄດ້ ທັງອາດຕະມາພາບແລະຜູ້ອື່ນກໍຮູ້ຊັດວ່າ "ເຮົາຮູ້ ເຮົາເຫັນ" ອາດຕະມາພາບຈຶ່ງຄິດວ່າ "ອຸທະກະດາບົດ ຣາມະບຸດປະກາດທຳນີ້ດ້ວຍເຫດພຽງຄວາມເຊື່ອແນວດຽວວ່າ

"ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ກໍເປັນໄປບໍ່ໄດ້ ແຕ່ອຸທະກະດາບົດ ຣາມະບຸດຍັງຮູ້ຍັງເຫັນທຳນີ້ດ້ວຍປັນຍາອັນຍິ່ງເອງແນ່ນອນ"

ຈາກນັ້ນ ອາດຕະມາພາບຈຶ່ງເຂົ້າໄປຫາອຸທະກະດາບົດ ຣາມະບຸດແລ້ວຖາມວ່າ "ທ່ານຣາມະ ທ່ານປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງທໍ່ໃດ?"

ເມື່ອອາດຕະມາພາບຖາມແນວນີ້ ອຸທະກະດາບົດ ຣາມະບຸດຈຶ່ງປະກາດເນວະສັນຍານາສັນຍາຍະຕະນະສະມາບັດແກ່ອາດຕະມາພາບ ອາດຕະມາພາບຈຶ່ງຄິດວ່າ "ບໍ່ແມ່ນແຕ່ອຸທະກະດາບົດ ຣາມະບຸດ ທໍ່ນັ້ນທີ່ມີສັດທາ ແມ່ນເຮົາກໍມີສັດທາ ຯລຯ ມີວິຣິຍະ ຯລຯ ມີສະຕິ ຯລຯ ມີສະມາທິ ຯລຯ ບໍ່ແມ່ນແຕ່ ອຸທະກະດາບົດ ຣາມະບຸດທໍ່ນັ້ນທີ່ມີປັນຍາ ແມ່ນເຮົາກໍມີປັນຍາ ທາງທີ່ດີ ເຮົາຄວນເລີ່ມພໍ່າເພັງພຽນເພື່ອເຮັດໃຫ້ແຈ້ງທຳທີ່ອຸທະກະດາບົດ ຣາມະບຸດປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ຈາກນັ້ນບໍ່ດົນ ອາດຕະມາພາບກໍໄດ້ເຮັດໃຫ້ແຈ້ງທຳນັ້ນດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່

ຈາກນັ້ນ ອາດຕະມາພາບຈຶ່ງເຂົ້າໄປຫາອຸທະກະດາບົດ ຣາມະບຸດແລ້ວຖາມວ່າ "ທ່ານຣາມະ ທ່ານປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງທໍ່ນີ້ບໍ?"

ອຸທະກະດາບົດ ຣາມະບຸດຕອບວ່າ "ທ່ານຜູ້ມີອາຍຸ ຂ້າພະເຈົ້າປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງທໍ່ນີ້ແລ"

(ອາດຕະມາພາບຈຶ່ງກ່າວວ່າ) "ແມ່ນຂ້າພະເຈົ້າກໍເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງທໍ່ນີ້"

(ອຸທະກະດາບົດ ຣາມະບຸດກ່າວວ່າ) "ທ່ານຜູ້ມີອາຍຸ ເປັນລາບຂອງພວກຂ້າພະເຈົ້າ ພວກຂ້າພະເຈົ້າໄດ້ດີແລ້ວທີ່ໄດ້ພົບເພື່ອນພົມມະຈາຣີເຊັ່ນທ່ານ ຍ້ອນ (ຂ້າພະເຈົ້າ) ຣາມະປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳໃດດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ທ່ານກໍເຮັດໃຫ້ແຈ້ງທຳນັ້ນດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ທ່ານເຮັດໃຫ້ແຈ້ງທຳໃດດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ຣາມະກໍປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳນັ້ນດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ຣາມະຮູ້ທຳໃດ ທ່ານກໍຮູ້ທຳນັ້ນ ທ່ານຮູ້ທຳໃດ ຣາມະກໍຮູ້ທຳນັ້ນ ເປັນອັນວ່າຣາມະເປັນເຊັ່ນໃດ ທ່ານກໍເປັນເຊັ່ນນັ້ນ ທ່ານເປັນເຊັ່ນໃດ ຣາມະກໍເປັນເຊັ່ນນັ້ນ ມາເທີ້ນ ບັດນີ້ ທ່ານຈົ່ງບໍລິຫານຄະນະນີ້"

ຣາດຊະກຸມານ ອຸທະກະດາບົດ ຣາມະບຸດທັງທີ່ເປັນເພື່ອນພົມມະຈາຣີຂອງອາດຕະມາ

ພາບ ກໍຍັງຍ້ອງຍໍອາດຕະມາພາບໄວ້ໃນຖານະອາຈານ ແລະ ບູຊາອາດຕະມາພາບດ້ວຍການບູຊາຢ່າງດີ ດ້ວຍປະການແນວນີ້ ແຕ່ອາດຕະມາພາບຄິດວ່າ "ທຳນີ້ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍ ກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ແລະ ເພື່ອນິບພານ ເປັນໄປພຽງເພື່ອເຂົ້າເຖິງເນວະສັນຍານາສັນຍາຍະຕະນະສະມາບັດທໍ່ນັ້ນ" ອາດຕະມາພາບບໍ່ພໍໃຈ ເບື່ອໜ່າຍ ທຳນັ້ນ ຈຶ່ງລາຈາກໄປ

## ຊີງພໍ່າເພັງພຽນ

[໓໘໙] ຣາດຊະກຸມານ ອາດຕະມາພາບນັ້ນສະແຫວງຫາວ່າອັນໃດເປັນກຸສົນ ຂະນະທີ່ສະແຫວງຫາທາງອັນປະເສີດຄືຄວາມສະງົບເຊິ່ງບໍ່ມີທາງອື່ນຍິ່ງກວ່າ ເມື່ອທ່ຽວຈາຣິກໄປໃນແຄວ້ນມະຄົດໂດຍລຳດັບ ໄດ້ໄປເຖິງເຂດອຸຣຸເວລາເສນານິຄົມ ໄດ້ເຫັນພູມປະເທດທີ່ໜ້າອອນຊອນ ມີແຄມປ່າໜ້າເພີດເພີນໃຈ ມີແມ່ນ້ຳໄຫຼລິນບໍ່ຂາດສາຍ ມີທ່ານ້ຳສະອາດດີ ໜ້າອອນຊອນ ມີໂຄຈອນຄາມຢູ່ໂດຍຮອບ ອາດຕະມາພາບຈຶ່ງຄິດວ່າ "ພູມປະເທດເປັນທີ່ໜ້າອອນຊອນ ມີແຄມປ່າໜ້າເພີດເພີນໃຈ ມີແມ່ນ້ຳໄຫຼລິນບໍ່ຂາດສາຍ ມີທ່ານ້ຳສະອາດດີ ໜ້າອອນຊອນ ມີໂຄຈອນຄາມຢູ່ໂດຍຮອບ ເໝາະແກ່ການພໍ່າເພັງພຽນຂອງກຸນລະບຸດຜູ້ປາຖະໜາຈະພໍ່າເພັງພຽນ" ອາດຕະມາພາບຈຶ່ງນັ່ງ ໃນບ່ອນນັ້ນດ້ວຍຄິດວ່າ "ທີ່ນີ້ເໝາະແກ່ການພໍ່າເພັງພຽນ"

## ອຸປະມາ ໓ ຂໍ້

ຣາດຊະກຸມານ ຄັ້ງນັ້ນ ອຸປະມາ ໓ ຂໍ້ ອັນໜ້າອັດສະຈັນຢ່າງຍິ່ງ ເຊິ່ງອາດຕະມາພາບຍັງບໍ່ເຄີຍ ໄດ້ຍິນມາກ່ອນ ໄດ້ຜາກົດແກ່ອາດຕະມາພາບ ຄື

໑. ປຽບຄື ໄມ້ສົດມີຢາງທີ່ແຊ່ຢູ່ໃນນ້ຳ ບຸຣຸດນຳໄມ້ນັ້ນມາເຮັດໄມ້ສີໄຟ ດ້ວຍຫວັງວ່າ "ເຮົາຈັກກໍ່ໄຟໃຫ້ເກີດຄວາມຮ້ອນຂຶ້ນ"

ຣາດຊະກຸມານ ພຣະອົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ບຸຣຸດນັ້ນນຳໄມ້ສົດທີ່ມີຢາງເຊິ່ງແຊ່ຢູ່ໃນນ້ຳມາເຮັດໄມ້ສີໄຟແລ້ວສີໃຫ້ເປັນໄຟເກີດຄວາມຮ້ອນຂຶ້ນໄດ້ບໍ່?"

"ບໍ່ໄດ້ ຂ້ານ້ອຍ"

"ຂໍ້ນັ້ນຍ້ອນເຫດໃດ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນໄມ້ສົດນັ້ນມີຢາງ ທັງຍັງແຊ່ຢູ່ໃນນ້ຳ ບຸຣຸດນັ້ນກໍມີແຕ່ຄວາມເມື່ອຍລ້າລຳບາກເປົ່າ"

"ຣາດຊະກຸມານ ແນວນັ້ນຄືກັນ ສະມະໜະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ມີກາຍແລະຈິດຍັງບໍ່

ຫລີກອອກຈາກກາມ ຍັງມີຄວາມພໍໃຈ ຄວາມຮັກແພງ ຄວາມຫລົງ ຄວາມຢາກ ແລະຄວາມກະວົນກະວາຍໃນກາມທັງຫລາຍ ຍັງບໍ່ໄດ້ລະແລະບໍ່ໄດ້ລະງັບແນວຄົບຖ້ວນໃນພາຍໃນ ສະມະໜະຫຼືພາມຜູ້ຈະເລີນເຫຼົ່ານັ້ນແມ່ນສະເຫວີຍທຸກຂະເວທະນາ ທີ່ກ້າແຂງ ຫຍາບ ເຜັດຮ້ອນ ເຊິ່ງເກີດຂຶ້ນຍ້ອນຄວາມພຽນ ກໍເປັນຜູ້ບໍ່ຄວນແກ່ການຮູ້ ການເຫັນ ແລະການຕັດສະຮູ້ອັນປະເສີດ ແມ່ນບໍ່ໄດ້ສະເຫວີຍທຸກຂະເວທະນາທີ່ກ້າແຂງ ຫຍາບ ເຜັດຮ້ອນ ເຊິ່ງເກີດຂຶ້ນຍ້ອນຄວາມພຽນ ກໍເປັນຜູ້ບໍ່ຄວນແກ່ການຮູ້ ການເຫັນ ແລະການ ຕັດສະຮູ້ອັນປະເສີດ

ນີ້ເປັນອຸປະມາຂໍ້ທີ່ ໑ ອັນໜ້າອັດສະຈັນຢ່າງຍິ່ງ ເຊິ່ງອາດຕະມາພາບຍັງບໍ່ເຄີຍໄດ້ຍິນມາກ່ອນ ໄດ້ຜາກົດແກ່ເຮົາ

[໓໖໐] ໔. ປຽບຄື ໄມ້ສົດມີຢາງທີ່ວາງຢູ່ເທິງບົກຫ່າງຈາກນ້ຳ ບຸຣຸດນຳໄມ້ນັ້ນ ມາເຮັດໄມ້ສີໄຟດ້ວຍຫວັງວ່າ "ເຮົາຈັກກໍ່ໄຟໃຫ້ເກີດຄວາມຮ້ອນຂຶ້ນ"

ຣາດຊະກຸມານ ພຣະອົງເຂົ້າພຣະຫະໄທຄວາມຂໍ້ນັ້ນວ່າແນວໃດ ບຸຣຸດນັ້ນນຳໄມ້ສົດທີ່ມີຢາງເຊິ່ງວາງຢູ່ເທິງບົກຫ່າງຈາກນ້ຳມາເຮັດເປັນໄມ້ສີໄຟ ແລ້ວສີໃຫ້ເປັນໄຟເກີດຄວາມຮ້ອນຂຶ້ນໄດ້ບໍ່"

"ບໍ່ໄດ້ ຂ້ານ້ອຍ"

"ຂໍ້ນັ້ນຍ້ອນເຫດໃດ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນໄມ້ຍັງສົດແລະມີຢາງ ແມ່ນຈະວາງຢູ່ເທິງບົກຫ່າງຈາກນ້ຳ ບຸຣຸດນັ້ນກໍມີແຕ່ຄວາມເມື່ອຍລ່າລຳບາກເປົ່າ"

"ຣາດຊະກຸມານ ແນວນັ້ນຄືກັນ ສະມະໜະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ແມ່ນມີກາຍແລະຈິດຫລີກອອກຈາກກາມແລ້ວ ແຕ່ຍັງມີຄວາມພໍໃຈ ຄວາມຮັກແພງ ຄວາມຫລົງ ຄວາມຢາກ ແລະຄວາມກະວົນກະວາຍໃນກາມທັງຫລາຍ ຍັງບໍ່ໄດ້ລະ ແລະ ບໍ່ໄດ້ລະງັບແນວຄົບຖ້ວນໃນພາຍໃນ ສະມະໜະ ຫຼື ພາມຜູ້ຈະເລີນເຫຼົ່ານັ້ນແມ່ນສະເຫວີຍທຸກຂະເວທະນາ ທີ່ກ້າແຂງ ຫຍາບ ເຜັດຮ້ອນ ເຊິ່ງເກີດຂຶ້ນຍ້ອນຄວາມພຽນ ກໍເປັນຜູ້ບໍ່ຄວນແກ່ການຮູ້ ການເຫັນ ແລະ ການຕັດສະຮູ້ອັນປະເສີດ ແມ່ນບໍ່ໄດ້ສະເຫວີຍທຸກຂະເວທະນາທີ່ກ້າແຂງ ຫຍາບ ເຜັດຮ້ອນ ເຊິ່ງເກີດຂຶ້ນຍ້ອນຄວາມພຽນ ກໍເປັນຜູ້ບໍ່ຄວນແກ່ການຮູ້ ການເຫັນ ແລະ ການຕັດສະຮູ້ອັນປະເສີດ

ນີ້ເປັນອຸປະມາຂໍ້ທີ່ ໔ ອັນໜ້າອັດສະຈັນຢ່າງຍິ່ງ ເຊິ່ງອາດຕະມາພາບຍັງບໍ່ເຄີຍໄດ້ຍິນມາກ່ອນ ໄດ້ຜາກົດແກ່ອາດຕະມາພາບ

[໓໓໑] ໓. ປຽບຄື ໄມ້ທີ່ແຫ້ງສະນິດເຊິ່ງວາງຢູ່ເທິງບົກຫ່າງຈາກນ້ຳ ບຸຣຸດນຳມາເຮັດເປັນໄມ້ສີໄຟດ້ວຍຫວັງວ່າ "ເຮົາຈັກກໍ່ໄຟໃຫ້ເກີດຄວາມຮ້ອນຂຶ້ນ"

ຣາດຊະກຸມານ ພຣະອົງເຂົ້າພຣະຫະໄທຄວາມຂໍ້ນັ້ນວ່າແນວໃດ ບຸຣຸດນັ້ນນຳໄມ້ທີ່ແຫ້ງສະນິດເຊິ່ງວາງຢູ່ເທິງບົກຫ່າງຈາກນ້ຳມາເຮັດເປັນໄມ້ສີໄຟ ແລ້ວສີໃຫ້ເປັນໄຟເກີດຄວາມຮ້ອນຂຶ້ນໄດ້ບໍ່?"

"ໄດ້ ຂ້ານ້ອຍ"

"ຂໍ້ນັ້ນຍ້ອນເຫດໃດ?"

"ຂ້າແດ່ພຣະອົງຜູ້ຈະເລີນ ຍ້ອນໄມ້ແຫ້ງສະນິດ ທັງວາງຢູ່ເທິງບົກຫ່າງຈາກນ້ຳ"

"ຣາດຊະກຸມານ ແນວນັ້ນຄືກັນ ສະມະໜະຫຼືພາມເຫຼົ່າໃດເຫຼົ່າໜຶ່ງມີກາຍ ແລະ ຈິດຫລີກອອກຈາກກາມແລ້ວ ທັງລະແລະລະງັບຄວາມພໍໃຈ ຄວາມຮັກແພງ ຄວາມຫລົງ ຄວາມຢາກ ແລະຄວາມກະວົນກະວາຍໃນກາມທັງຫລາຍໄດ້ຢ່າງຄົບຖ້ວນໃນພາຍໃນແລ້ວ ສະມະໜະຫຼືພາມຜູ້ຈະເລີນເຫຼົ່ານັ້ນ ແມ່ນສະເຫວີຍທຸກຂະເວທະນາທີ່ກ້າແຂງ ຫຍາບ ເຜັດຮ້ອນ ເຊິ່ງເກີດຂຶ້ນຍ້ອນຄວາມພຽນ ກໍເປັນຜູ້ຄວນແກ່ການຮູ້ ການເຫັນ ແລະການຕັດສະຣູ້ອັນ ປະເສີດ ແມ່ນບໍ່ໄດ້ສະເຫວີຍທຸກຂະເວທະນາທີ່ກ້າແຂງ ຫຍາບ ເຜັດຮ້ອນ ເຊິ່ງເກີດຂຶ້ນຍ້ອນ ຄວາມພຽນ ກໍເປັນຜູ້ຄວນແກ່ການຮູ້ ການເຫັນ ແລະ ການຕັດສະຣູ້ອັນປະເສີດ

ນີ້ເປັນອຸປະມາຂໍ້ທີ່ ໓ ອັນໜ້າອັດສະຈັນຢ່າງຍິ່ງ ເຊິ່ງອາດຕະມາພາບຍັງບໍ່ເຄີຍໄດ້ຍິນມາກ່ອນໄດ້ຜາກົດແກ່ອາດຕະມາພາບ

ຣາດຊະກຸມານ ນີ້ຄືອຸປະມາ ໓ ຂໍ້ອັນໜ້າອັດສະຈັນຢ່າງຍິ່ງ ເຊິ່ງອາດຕະມາພາບຍັງບໍ່ເຄີຍໄດ້ຍິນມາກ່ອນ ໄດ້ຜາກົດແກ່ອາດຕະມາພາບ

## ຊົງພໍາເພັງທຸກກະຣະກິຣິຍາ

[໓໓໔] ຣາດຊະກຸມານ ອາດຕະມາພາບນັ້ນມີຄວາມດຳຣິວ່າ "ທາງທີ່ດີ ເຮົາຄວນກົດແຂ້ວ ດ້ວຍແຂ້ວ ໃຊ້ລີ້ນດັນເພດານໄວ້ແໜ້ນ ໃຊ້ຈິດຂົ່ມຄັ້ນຈິດ ເຮັດຈິດໃຫ້ຮ້ອນຮົນ" ອາດຕະມາພາບນັ້ນ ກໍກັດເນັ້ນແຂ້ວ ໃຊ້ລີ້ນດັນເພດານໄວ້ແໜ້ນ ໃຊ້ຈິດຂົ່ມຄັ້ນຈິດ ເຮັດຈິດໃຫ້ຮ້ອນຮົນ ເມື່ອອາດຕະມາພາບເຮັດດັ່ງນັ້ນ ເຫື່ອກໍໄຫຼອອກຈາກຂີ້ແຮ້ທັງ ໔ ຂ້າງ ຄົນທີ່ແຂງແຮງຈັບຄົນທີ່ອ່ອນແອກວ່າທີ່ຫົວຫຼືທີ່ຄໍ ແລ້ວບີບຄັ້ນຮັດໄວ້ໃຫ້ແໜ້ນ ແມ່ນສັນໃດ ອາດຕະມາພາບກໍສັນນັ້ນ ຄືກັນ ເມື່ອກັດເນັ້ນແຂ້ວ ໃຊ້ລີ້ນດັນເພດານໄວ້ແໜ້ນ ໃຊ້ຈິດຂົ່ມຄັ້ນຈິດ ເຮັດຈິດໃຫ້ ຮ້ອນຮົນ

ເທື່ອກໍໄຫຼອອກຈາກຂີ້ແຮ້ທັງ ໔ ຂ້າງ

ອາດຕະມາພາບຜາຣົບຄວາມພຽນບໍ່ຫຍ່ອນຍານ ມີສະຕິຕັ້ງໝັ້ນ ບໍ່ຟັ່ນເຟືອນ ແຕ່ເມື່ອອາດຕະມາພາບຖືກຄວາມພຽນທີ່ທົນໄດ້ຍາກນັ້ນສຽດແທງຢູ່ ກາຍຂອງອາດຕະມາພາບກໍກະວົນກະວາຍ ບໍ່ສະງົບລະງັບ

[໓໓໓] ຣາດຊະກຸມານ ອາດຕະມາພາບຈຶ່ງມີຄວາມດໍາຣິວ່າ "ທາງທີ່ດີ ເຮົາຄວນພໍ່າເພັງຊານ ອັນບໍ່ມີລົມຫາຍໃຈສິ້ນສຸດເທີ້ນ" ອາດຕະມາພາບກໍກັ້ນລົມຫັນໃຈເຂົ້າ ແລະ ລົມຫັນໃຈອອກທັງທາງປາກແລະທາງດັງ ເມື່ອອາດຕະມາພາບກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກແລະທາງດັງ ລົມກໍອອກທາງຫູທັງ ໔ ຂ້າງ ມີສຽງດັງອູ້ ໆ ລົມທີ່ຊ່າງຄໍາສູບຢູ່ມີສຽງດັງອູ້ ໆ ແມ່ນສັນໃດ ເມື່ອອາດຕະມາພາບກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກທັງທາງປາກແລະ ທາງດັງ ລົມກໍອອກທາງຫູທັງ ໔ ຂ້າງ ມີສຽງດັງອູ້ ໆ ສັນນັ້ນຄືກັນ

ອາດຕະມາພາບຜາຣົບຄວາມພຽນບໍ່ຫຍ່ອນຍານ ມີສະຕິຕັ້ງໝັ້ນ ບໍ່ຟັ່ນເຟືອນ ແຕ່ເມື່ອອາດຕະມາພາບຖືກຄວາມພຽນທີ່ທົນໄດ້ຍາກນັ້ນສຽດແທງຢູ່ ກາຍຂອງອາດຕະມາພາບກໍກະວົນກະວາຍ ບໍ່ສະງົບລະງັບ

ອາດຕະມາພາບຈຶ່ງມີຄວາມດໍາຣິວ່າ "ທາງທີ່ດີ ເຮົາຄວນພໍ່າເພັງຊານອັນບໍ່ມີລົມຫາຍໃຈສິ້ນສຸດເທີ້ນ" ອາດຕະມາພາບກໍກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງຮູຫູ ເມື່ອອາດຕະມາພາບກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງ ຮູຫູ ລົມອັນແຮງກ້າກໍສຽດແທງຫົວ ຄົນທີ່ແຂງແຮງໃຊ້ເຫລັກທີ່ແຫລມຄົມແທງຫົວແມ່ນສັນໃດ ເມື່ອອາດຕະມາພາບກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງຮູຫູ ລົມອັນແຮງກ້າກໍສຽດແທງຫົວ ສັນນັ້ນຄືກັນ

ອາດຕະມາພາບຜາຣົບຄວາມພຽນບໍ່ຫຍ່ອນຍານ ມີສະຕິຕັ້ງໝັ້ນ ບໍ່ຟັ່ນເຟືອນ ແຕ່ເມື່ອອາດຕະມາພາບຖືກຄວາມພຽນທີ່ທົນໄດ້ຍາກນັ້ນສຽດແທງຢູ່ ກາຍຂອງອາດຕະມາພາບກໍກະວົນກະວາຍ ບໍ່ສະງົບລະງັບ

ອາດຕະມາພາບຈຶ່ງມີຄວາມດໍາຣິວ່າ "ທາງທີ່ດີ ເຮົາຄວນພໍ່າເພັງຊານອັນບໍ່ມີລົມຫາຍໃຈສິ້ນສຸດເທີ້ນ" ອາດຕະມາພາບກໍກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງຮູຫູ ເມື່ອອາດຕະມາພາບກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງ ຮູຫູ ກໍມີທຸກຂະເວທະນາໃນຫົວແນວແຮງກ້າ ຄົນທີ່ແຂງແຮງໃຊ້ເຊືອກໜັງທີ່ໜຽວຂັນຫົວ ແມ່ນສັນໃດ ເມື່ອອາດຕະມາພາບກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງຮູຫູ ກໍມີທຸກຂະເວທະນາໃນຫົວແນວແຮງກ້າ ສັນນັ້ນຄືກັນ

ອາດຕະມາພາບຜາຣົບຄວາມພຽນບໍ່ທໍ້ຖອຍ ມີສະຕິຕັ້ງໝັ້ນ ບໍ່ຟັ່ນເຟືອນ ແຕ່ເມື່ອອາດຕະມາພາບຖືກຄວາມພຽນທີ່ທົນໄດ້ຍາກນັ້ນສຽດແທງຢູ່ ກາຍຂອງອາດຕະມາພາບກໍກະວົນກະວາຍ ບໍ່ສະງົບລະງັບ

ອາດຕະມາພາບຈຶ່ງມີຄວາມດໍາຣິວ່າ "ທາງທີ່ດີ ເຮົາຄວນພໍາເພັງຊານອັນບໍ່ມີລົມຫາຍໃຈສິ້ນສຸດເທີ້ນ" ອາດຕະມາພາບກໍກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງຮູຫູ ເມື່ອອາດຕະມາພາບກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງ ຮູຫູ ລົມອັນແຮງກ້າກໍບາດໃນບໍລິເວນທ້ອງ ຄົນຂ້າງົວຫຼືລູກມືຂອງຄົນຂ້າງົວຜູ້ຊ່ຽວຊານ ໃຊ້ມີດແລ່ເນື້ອທີ່ຄົມຂີດທ້ອງ ແມ່ນສັນໃດ ເມື່ອອາດຕະມາພາບກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງຮູຫູ ກໍມີລົມອັນແຮງກ້າບາດໃນບໍລິເວນທ້ອງສັນນັ້ນຄືກັນ

ອາດຕະມາພາບຜາຣົບຄວາມພຽນບໍ່ທໍ້ຖອຍ ມີສະຕິຕັ້ງໝັ້ນ ບໍ່ຟັ່ນເຟືອນ ແຕ່ເມື່ອອາດຕະມາພາບຖືກຄວາມພຽນທີ່ທົນໄດ້ຍາກນັ້ນສຽດແທງຢູ່ ກາຍຂອງອາດຕະມາພາບກໍກະວົນກະວາຍ ບໍ່ສະງົບລະງັບ

ອາດຕະມາພາບຈຶ່ງມີຄວາມດໍາຣິວ່າ "ທາງທີ່ດີ ເຮົາຄວນພໍາເພັງຊານອັນບໍ່ມີລົມຫາຍໃຈສິ້ນສຸດເທີ້ນ" ອາດຕະມາພາບກໍກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງຮູຫູ ເມື່ອອາດຕະມາພາບກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງ ຮູຫູ ກໍມີຄວາມກະວົນກະວາຍໃນຮ່າງກາຍແນວແຮງກ້າ ຄົນທີ່ແຂງແຮງ ໒ ຄົນຈັບແຂນຄົນທີ່ອ່ອນແອກວ່າຄົນລະຂ້າງກ້າວໃຫ້ຮ້ອນເທິງຂຸມຖ່ານໄຟ ແມ່ນສັນໃດ ເມື່ອອາດຕະມາພາບກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງຮູຫູ ກໍມີຄວາມກະວົນກະວາຍໃນຮ່າງກາຍແນວແຮງກ້າ ສັນນັ້ນຄືກັນ

ອາດຕະມາພາບຜາຣົບຄວາມພຽນບໍ່ທໍ້ຖອຍ ມີສະຕິຕັ້ງໝັ້ນ ບໍ່ຟັ່ນເຟືອນ ແຕ່ເມື່ອອາດຕະມາພາບຖືກຄວາມພຽນທີ່ທົນໄດ້ຍາກນັ້ນສຽດແທງຢູ່ ກາຍຂອງອາດຕະມາພາບກໍກະວົນກະວາຍ ບໍ່ສະງົບລະງັບ

ເທວະດາທັງຫລາຍເຫັນອາດຕະມາພາບແລ້ວກໍພາກັນກ່າວແນວນີ້ວ່າ "ພຣະສະມະນະໂຄດົມ ສິ້ນພະຊົນແລ້ວ" ລາງພວກກ່າວແນວນີ້ວ່າ "ພຣະສະມະນະໂຄດົມຍັງບໍ່ໄດ້ສິ້ນພະຊົນແຕ່ກໍາລັງຈະສິ້ນພະຊົນ" ລາງພວກກ່າວແນວນີ້ວ່າ "ພຣະສະມະນະໂຄດົມຍັງບໍ່ສິ້ນພະຊົນ ທັງຈະບໍ່ສິ້ນພະຊົນ ພຣະສະມະນະໂຄດົມຈະເປັນພຣະອະຣະຫັນ ການຢູ່ແນວນີ້ນັ້ນ ເປັນວິຫານທໍາຂອງທ່ານຜູ້ເປັນພຣະອະຣະຫັນ"

[໓໓໔] ຣາດຊະກຸມານ ອາດຕະມາພາບຈຶ່ງມີຄວາມດຳຣິວ່າ "ທາງທີ່ດີ ເຮົາຄວນປະຕິບັດດ້ວຍການອົດອາຫານທຸກແນວ" ຂະນະນັ້ນ ເທວະດາທັງຫລາຍເຂົ້າມາຫາອາດຕະມາພາບແລ້ວກ່າວວ່າ "ຂ້າແດ່ ທ່ານຜູ້ນິຣະທຸກ ທ່ານຢ່າໄດ້ປະຕິບັດດ້ວຍການອົດອາຫານທຸກແນວ ຖ້າທ່ານຈັກປະຕິບັດດ້ວຍການອົດອາຫານທຸກແນວ ຂ້າພະເຈົ້າທັງຫລາຍຈະແຊກໂອຊາອັນເປັນທິບເຂົ້າທາງຂຸມຂົນຂອງທ່ານ ທ່ານຈະໄດ້ຍັງອັດພາບໃຫ້ເປັນໄປດ້ວຍໂອຊານັ້ນ" ອາດຕະມາພາບຈຶ່ງມີຄວາມດຳຣິວ່າ "ເຮົາປະຕິຍານວ່າ ຈະຕ້ອງອົດອາຫານທຸກແນວ ແຕ່ເທວະດາເຫລົ່ານີ້ຈະແຊກໂອຊາອັນເປັນທິບເຂົ້າທາງຂຸມຂົນຂອງເຮົາ ເຮົາຈະຍັງອັດພາບໃຫ້ເປັນໄປດ້ວຍໂອຊານັ້ນການປະຕິຍານນັ້ນກໍຈະເພິ່ງເປັນມຸສາແກ່ເຮົາ" ອາດຕະມາພາບຈຶ່ງກ່າວຫ້າມເທວະດາເຫຼົ່ານັ້ນວ່າ "ຢ່າເລີຍ"

ອາດຕະມາພາບມີຄວາມດຳຣິວ່າ "ທາງທີ່ດີ ເຮົາຄວນກິນອາຫານໃຫ້ໜ້ອຍລົງ ໆ ພຽງຄັ້ງລະ ໑ ຟາຍມືແດ່ ທໍ່ເຍື່ອໃນເມັດຖົ່ວຂຽວແດ່ ທໍ່ເຍື່ອໃນເມັດຖົ່ວພູແດ່ ທໍ່ເຍື່ອໃນເມັດຖົ່ວດຳແດ່ ທໍ່ເຍື່ອໃນເມັດບົວແດ່" ອາດຕະມາພາບຈຶ່ງສັນອາຫານໜ້ອຍລົງ ໆ ພຽງຄັ້ງລະ ໑ ຟາຍມືແດ່ ທໍ່ເຍື່ອໃນເມັດຖົ່ວຂຽວແດ່ ທໍ່ເຍື່ອໃນເມັດຖົ່ວພູແດ່ ທໍ່ເຍື່ອໃນເມັດຖົ່ວດຳແດ່ ທໍ່ເຍື່ອໃນເມັດບົວແດ່ ເມື່ອອາດຕະມາພາບສັນອາຫານໜ້ອຍລົງ ໆ ພຽງຄັ້ງລະ ໑ ຟາຍມືແດ່ ທໍ່ເຍື່ອໃນເມັດຖົ່ວຂຽວແດ່ ທໍ່ເຍື່ອໃນເມັດຖົ່ວພູແດ່ ທໍ່ເຍື່ອໃນເມັດຖົ່ວດຳແດ່ ທໍ່ເຍື່ອໃນເມັດບົວແດ່ ກາຍຈຶ່ງຈ່ອຍແຫ້ງຫຼາຍ ອະໄວຍະວະນ້ອຍໃຫຍ່ ຂອງອາດຕະມາພາບຈຶ່ງເປັນຄືເຄືອເຂົາທີ່ມີຂໍ້ຫຼາຍຫຼືເຄືອເຂົາທີ່ມີຂໍ້ດຳ ຊີ້ນສະໂພກ ກໍລີບຄືກີບຕີນອູດ ກະດູກສັນຫລັງກໍຜຸດເປັນໜາມຄືເຄືອເຂົາ ຊີ່ໂຄງທັງ ໔ ຂ້າງ ຂຶ້ນສະພັ່ງຄືກອນສາລາເກົ່າ ດວງຕາທັງ ໔ ກໍເລິກເຂົ້າໄປໃນເບົ້າຕາ ຄື ດວງດາວຜາກົດຢູ່ໃນນ້ຳສ້າງເລິກ ໜັງເທິງຫົວກໍຫ່ຽວຫົດຄືລູກນ້ຳເຕົ້າທີ່ເຂົາຕັດມາຂະນະຍັງດິບຕ້ອງລົມແລະແດດເຂົ້າກໍຫ່ຽວຫົດໄປ ຍ້ອນເປັນຜູ້ມີອາຫານໜ້ອຍນັ້ນ ອາດຕະມາພາບ ຄິດວ່າ "ຈະລູບພື້ນທ້ອງ" ກໍຈັບເຖິງກະດູກສັນຫລັງ ຄິດວ່າ "ຈະລູບກະດູກສັນຫລັງ" ກໍຈັບເຖິງພື້ນທ້ອງຍ້ອນພື້ນທ້ອງຂອງອາດຕະມາພາບແນບຕິດຈົນເຖິງກະດູກສັນຫລັງ ອາດຕະມາພາບຄິດວ່າ "ຈະຖ່າຍອຸດຈາຣະຫຼືຖ່າຍປັດສາວະ" ກໍຊວນເຊລົ້ມລົງ ໃນບ່ອນນັ້ນ ເມື່ອຈະໃຫ້ກາຍສະບາຍແດ່ຈຶ່ງໃຊ້ຝາມືລູບໂຕ ຂົນທັງຫລາຍທີ່ມີຮາກເນົ່າກໍລຸດຣ່ວງຈາກກາຍ ຍ້ອນເປັນຜູ້ມີອາຫານໜ້ອຍມະນຸດທັງຫລາຍເຫັນອາດຕະມາພາບແລ້ວ ກໍກ່າວແນວນີ້ວ່າ "ພຣະສະມະນະໂຄດົມດຳໄປ" ລາງພວກ ກໍກ່າວແນວນີ້ວ່າ "ພຣະສະມະນະໂຄດົມບໍ່ດຳພຽງແຕ່ແຫຼ້ໄປ" ລາງພວກກໍກ່າວແນວນີ້ວ່າ "ບໍ່ດຳ ບໍ່ແຫຼ້ ພຽງແຕ່ກະດ່າງກະດາວໄປ" ເຮົາມີຜິວພັນບໍລິສຸດ ພຸດຜ່ອງ ພຽງແຕ່ເສຍຜິວໄປ ຍ້ອນເປັນຜູ້ມີອາຫານໜ້ອຍທີ່ນັ້ນ

[໓໓໕] ຣາດຊະກຸມານ ອາດຕະມາພາບນັ້ນມີຄວາມດຳຣິວ່າ "ສະມະໜະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະດີດສະເຫວີຍທຸກຂະເວທະນາກ້າແຂງ ທຍາບ ເຜັດຮ້ອນ ທີ່ເກີດຂຶ້ນຍ້ອນຄວາມ

ພຽນ ທຸກຂະເວທະນານັ້ນ ຢ່າງຍິ່ງກໍພຽງທໍ່ນີ້ບໍ່ເກີນກວ່ານີ້ໄປ ສະມະໜະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ໃນອະນາຄົດສະເຫວີຍທຸກຂະເວທະນາກ້າແຂງ ຫຍາບ ເຜັດຮ້ອນ ທີ່ເກີດຂຶ້ນຍ້ອນ ຄວາມພຽນ ທຸກຂະເວທະນານັ້ນ ຢ່າງຍິ່ງກໍພຽງທໍ່ນີ້ບໍ່ເກີນກວ່ານີ້ໄປ ສະມະໜະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນ ປັດຈຸບັນ ສະເຫວີຍທຸກຂະເວທະນາກ້າແຂງ ຫຍາບ ເຜັດຮ້ອນ ທີ່ເກີດຂຶ້ນຍ້ອນຄວາມພຽນ ທຸກ ຂະເວທະນານັ້ນ ຢ່າງຍິ່ງກໍພຽງທໍ່ນີ້ບໍ່ເກີນກວ່ານີ້ໄປ ແຕ່ເຮົາກໍຍັງບໍ່ໄດ້ບັນລຸຍານທັດສະນະທີ່ປະ ເສີດອັນສາມາດ ວິເສດຍິ່ງກວ່າທຳຂອງ ມະນຸດ ດ້ວຍທຸກກອນກີຣິຍາອັນເຜັດຮ້ອນນີ້ ຈະເພິ່ງມີ ທາງອື່ນເພື່ອການຕັດສະຣູ້ແດ່ບໍ?"

ອາດຕະມາພາບຈຶ່ງມີຄວາມດຳຣິວ່າ "ເຮົາຈືໄດ້ຢູ່ ເມື່ອເວລາງານຂອງທ້າວຈັກກາທິບໍດີ ເຊິ່ງເປັນພຣະຣາຊະບິດາ ເຮົານັ່ງຢູ່ໃຕ້ຕົ້ນຫວ້າອັນຮົ່ມເຢັນ ໄດ້ສະຫງັດຈາກການແລະອະກຸສົນ ທຳທັງຫລາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ ທາງ ນັ້ນເພິ່ງເປັນທາງແຫ່ງການຕັດສະຣູ້ແມ່ນບໍ?" ອາດຕະມາພາບມີຄວາມຮູ້ແຈ້ງທີ່ຕາມຣະນຶກດ້ວຍ ສະຕິວ່າ "ທາງນັ້ນເປັນທາງແຫ່ງການຕັດສະຣູ້" ອາດຕະມາພາບຈຶ່ງມີຄວາມດຳຣິວ່າ "ເຮົາຢ້ານ ຄວາມສຸກທີ່ເວັ້ນ ຈາກການແລະອະກຸສົນທຳທັງຫລາຍບໍ" ອາດຕະມາພາບກໍດຳຣິວ່າ "ເຮົາບໍ່ ຢ້ານຄວາມສຸກທີ່ເວັ້ນ ຈາກການແລະອະກຸສົນທຳທັງຫລາຍເລີຍ"

ຣາດຊະກຸມານ ອາດຕະມາພາບຈຶ່ງມີຄວາມດຳຣິຕໍ່ໄປວ່າ "ເຮົາຜູ້ມີກາຍຈ່ອຍແຫ້ງຫຼາຍ ແບບນີ້ ຈະບັນລຸຄວາມສຸກນັ້ນບໍ່ແມ່ນເຮັດໄດ້ງ່າຍເລີຍ ທາງທີ່ດີ ເຮົາຄວນກິນອາຫານຫຍາບ ຄື ເຂົ້າສຸກແລະເຂົ້າໜົມກຸມມາດ" ອາດຕະມາພາບກໍສັນອາຫານຫຍາບຄືເຂົ້າສຸກແລະເຂົ້າໜົມກຸມ ມາດ ຄັ້ງນັ້ນ ພິກຂຸປັນຈະວັກຄີເຝົ້າບຳລຸງອາດຕະມາພາບ ດ້ວຍຫວັງວ່າ "ພຣະສະມະນະໂຄ ດົມບັນລຸທຳໃດ ຈັກບອກທຳນັ້ນແກ່ເຮົາທັງຫລາຍ" ເມື່ອໃດ ອາດຕະມາພາບສັນອາຫານຫຍາບ ຄືເຂົ້າສຸກ ແລະ ເຂົ້າໜົມກຸມມາດ ເມື່ອນັ້ນ ພິກຂຸປັນຈະວັກຄີນັ້ນ ກໍເບື່ອໜ່າຍຈາກໄປດ້ວຍ ເຂົ້າໃຈວ່າ "ພຣະສະມະນະໂຄດົມມັກຫຼາຍ ຄາຍຄວາມພຽນ ວຽນມາເພື່ອຄວາມເປັນຜູ້ມັກຫຼາຍ ສາແລ້ວ"

## ຊານ ໔ ແລະ ວິດຊາ ໓

[໓໓໗] ຣາດຊະກຸມານ ອາດຕະມາພາບສັນອາຫານຫຍາບໃຫ້ຮ່າງກາຍມີກຳລັງ ສະ ຫງັດຈາກການ ແລະ ອະກຸສົນທຳທັງຫລາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິແລະ ສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານມີຄວາມຜ່ອງໃສໃນ ພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິ ແລະ ສຸກອັນເກີດຈາກ ສະມາທິຢູ່ ຍ້ອນປີຕິຈາງຄາຍອອກ ມີອຸເປກຂາ ມີສະຕິສຳປະຊັນຍະສະເຫວີຍສຸກດ້ວຍນາມ ກາຍ ບັນລຸ ຕະຕິຍະຊານ ທີ່ພຣະອະຣິຍະທັງຫລາຍສັນເສີນວ່າ "ມີອຸເປກຂາ ມີສະຕິ ຢູ່ເປັນ

ສຸກ" ຍ້ອນ ລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານ ທີ່ບໍ່ມີທຸກບໍ່ມີສຸກມີສະຕິບໍລິສຸດຍ້ອນອຸເປກຂາຢູ່

ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມ ເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ອາດຕະມາພາບນັ້ນ ນ້ອມຈິດໄປເພື່ອປຸບເພນິວາສານຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໔ ຊາດແດ່ ໗ລ໗ ອາດຕະມາພາບຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້ ອາດຕະມາພາບໄດ້ບັນລຸວິດຊາທີ່ ໑ ນີ້ ໃນປະຖົມມະຍາມແຫ່ງຣາຕີ ກຳຈັດອະວິດຊາໄດ້ແລ້ວ ວິດຊາກໍເກີດຂຶ້ນ ກຳຈັດຄວາມມືດໄດ້ແລ້ວ ຄວາມສະຫວ່າງກໍເກີດຂຶ້ນ ຄືບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່

ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ອາດຕະມາພາບນັ້ນ ນ້ອມຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳ ໗ລ໗ ອາດຕະມາພາບໄດ້ບັນລຸວິດຊາທີ່ ໔ ນີ້ໃນມັດຊິມະຍາມແຫ່ງ ຣາຕີ ກຳຈັດອະວິດຊາໄດ້ແລ້ວ ວິດຊາກໍເກີດຂຶ້ນ ກຳຈັດຄວາມມືດໄດ້ແລ້ວ ຄວາມສະຫວ່າງ ກໍເກີດຂຶ້ນ ຄືບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່

ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ອາດຕະມາພາບນັ້ນ ນ້ອມຈິດໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣດ ນີ້ທຸກຂະນິໂຣດຄາມີນີປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸໄທ ນີ້ອາສະວະນິໂຣດນີ້ອາສະວະນິໂຣດຄາມີນີປະຕິປະທາ" ເມື່ອອາດຕະມາພາບຮູ້ເຫັນຢູ່ແນວນີ້ ຈິດກໍລຸດພົ້ນຈາກກາມາສະຫວະ ພະວາດະວະ ແລະອະວິດຊາສະຫວະ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນ ເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ຣາດຊະກຸມານ ອາດຕະມາພາບບັນລຸວິດຊາທີ່ ໓ ນີ້ໃນປັດສິມມະຍາມແຫ່ງຣາຕີ ກຳຈັດອະວິດຊາ ໄດ້ແລ້ວ ວິດຊາກໍເກີດຂຶ້ນ ກຳຈັດຄວາມມືດໄດ້ແລ້ວ ຄວາມສະຫວ່າງກໍເກີດຂຶ້ນ ຄືບຸກຄົນຜູ້ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່

## ຊົງມີຄວາມຂວນຂວາຍໜ້ອຍ

[໓໓໗] ຣາດຊະກຸມານ ອາດຕະມາພາບນັ້ນໄດ້ມີຄວາມດຳຣິວ່າ “ທຳທີ່ເຮົາໄດ້ບັນລຸແລ້ວນີ້ ເລິກເຊິ່ງ ເຫັນໄດ້ຍາກ ຮູ້ຕາມໄດ້ຍາກ ສະງົບ ປະນີດ ບໍ່ເປັນວິໄສແຫ່ງຕັກກະ ລະອຽດ ບັນດິດ (ທີ່ນັ້ນ) ຈຶ່ງຈະຮູ້ໄດ້ ສ່ວນໝູ່ປະຊາຜູ້ອອນຊອນດ້ວຍອາໄລ ຍິນດີໃນອາໄລ ເພີດເພີນ ໃນອາໄລ ຖານະທີ່ໝູ່ສັດຜູ້ອອນຊອນດ້ວຍອາໄລ ຍິນດີໃນອາໄລ ເພີດເພີນໃນອາໄລ ນີ້ຍ່ອມເປັນສິ່ງທີ່ເຫັນໄດ້ຍາກ ກ່າວຄືຫລັກອິທັປປັດຈະຍະຕາ (ຄວາມທີ່ມີສິ່ງນັ້ນສິ່ງນີ້ເປັນປັດໄຈ ຂອງສິ່ງນີ້) ຫລັກປະຕິດຈະສະມຸບບາດ(ການທີ່ສິ່ງທັງຫລາຍອາໄສກັນ ໆ ຈຶ່ງເກີດມີ) ເຖິງແມ່ນຖານະອັນນີ້ກໍເປັນສິ່ງທີ່ເຫັນໄດ້ຍາກນັກ ກ່າວຄືຄວາມສະງົບແຫ່ງສັງຂານທັງປວງ ຄວາມກຳຈັດຖິ້ມອຸປະທິທັງປວງ ຄວາມສິ້ນຕັນຫາ ວິຣາຄະ ນິໂຣດ ນິບພານ ກໍຖ້າເຮົາຈະເພິ່ງສະແດງທຳ ແລະຜູ້ອື່ນຈະບໍ່ເຂົ້າໃຈຊຶ້ງຕໍ່ເຮົາ ຂໍ້ນັ້ນກໍຈະເພິ່ງເປັນຄວາມເມື່ອຍລ່າເປົ່າແກ່ເຮົາ ຈະເພິ່ງ ເປັນຄວາມລຳບາກເປົ່າແກ່ເຮົາ”

ອັນໜຶ່ງ ຄາຖາອັນໜ້າອັດສະຈັບເຫລົ່ານີ້ທີ່ບໍ່ເຄີຍສະດັບມາກ່ອນ ໄດ້ຜາກົດແກ່ເຮົາວ່າ

“ບັດນີ້ ເຮົາຍັງບໍ່ຄວນປະກາດທຳທີ່ເຮົາບັນລຸດ້ວຍຄວາມລຳບາກ
ຍ້ອນທຳນີ້ບໍ່ແມ່ນທຳທີ່ຜູ້ຖືກຣາຄະແລະໂທສະຄອບງຳຈະຮູ້ໄດ້ງ່າຍ
ແຕ່ເປັນທຳທີ່ທວນກະແສ ລະອຽດ ເລິກເຊິ່ງ ຮູ້ເຫັນໄດ້ຍາກ ປະນີດ
ຜູ້ກຳໜັດດ້ວຍຣາຄະ ຖືກກອງໂມຫະຫຸ້ມຫໍ່ໄວ້ ຈັກຮູ້ເຫັນບໍ່ໄດ້”

ຣາດຊະກຸມານ ເມື່ອອາດຕະມາພາບພິຈາລະນາດັ່ງນີ້ ຈິດກໍນ້ອມໄປເພື່ອຄວາມຂວນຂວາຍໜ້ອຍ ບໍ່ໄດ້ນ້ອມໄປ ເພື່ອສະແດງທຳ

## ສະຫຳບໍດີພົມອາຣາດທະນາສະແດງທຳ

[໓໓໘] ຄັ້ງນັ້ນ ສະຫຳບໍດີພົມຮູ້ຄວາມດຳຣິໃນໃຈຂອງອາດຕະມາພາບດ້ວຍໃຈ (ຂອງຕົນ) ຈຶ່ງໄດ້ມີຄວາມລຳພຶງ ວ່າ

“ທ່ານຜູ້ຈະເລີນ ໂລກຈະສູນຫາຍແລ້ວນໍ ໂລກຈະພິນາດແລ້ວນໍ ຍ້ອນພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າຊົງນ້ອມພຣະຫະໄທໄປເພື່ອຄວາມຂວນຂວາຍນ້ອຍ ບໍ່ໄດ້ນ້ອມພຣະຫະໄທໄປເພື່ອຊົງສະແດງທຳ”

ລຳດັບນັ້ນ ສະຫຳບໍດີພົມອັນຕະຣະທານຈາກພົມມະໂລກມາຜາກົດຢູ່ເບື້ອງໜ້າອາດຕະມາພາບ ປຽບຄື ຄົນທີ່ແຂງແຮງຢຽດແຂນອອກຫຼືຄູ້ແຂນເຂົ້າ ແລ້ວຫົ່ມອຸດຕະຣາສົງ ບ່ຽງບ່າປະນົມມືມາທາງທິດທີ່ອາດຕະມາພາບຢູ່ ໄດ້ກ່າວກັບອາດຕະມາພາບວ່າ “ຂ້າແດ່ ພຣະອົງຜູ້ຈະ

ເລີນ ຂໍພຣະຜູ້ມີພຣະພາກເຈົ້າໄດ້ໂຜດສະແດງທຳ ຂໍພຣະສຸດຄົດເຈົ້າເຈົ້າໄດ້ໂຜດສະແດງທຳ ຍ້ອນສັດທັງຫລາຍຜູ້ມີທຸລີໃນດວງຕານ້ອຍ໑ມີຢູ່ ສັດເຫຼົ່ານັ້ນ ຈະເສື່ອມຍ້ອນບໍ່ໄດ້ສະດັບທຳ ສັດເຫຼົ່ານັ້ນຈັກເປັນຜູ້ຮູ້ທົ່ວເຖິງທຳ"

ສະຫຳບໍດີພົມໄດ້ທູນອາຣາດທະນາດັ່ງນີ້ ແລ້ວໄດ້ທູນເປັນຄາຖາປະພັນຕໍ່ໄປ ວ່າ

"ໃນການກ່ອນ ທຳທີ່ບໍ່ບໍລິສຸດ
ອັນຄົນທີ່ມີມົນທິນ໓ຄິດຄົ້ນໄວ້ ຜາກົດໃນແຄວ້ນມະຄົດ
ພຣະອົງໂຜດຊົງໄຂປະຕູອະມະຕະທຳນັ້ນເທີ້ນ
ຂໍສັດທັງຫລາຍຈົ່ງຟັງທຳທີ່ພຣະສຳພຸດທະເຈົ້າ
ຜູ້ປາສະຈາກມົນທິນ ໄດ້ຕັດສະຮູ້ແລ້ວຕາມລຳດັບ
ຂ້າແດ່ພຣະອົງຜູ້ມີພຣະປັນຍາດີ ມີພຣະສະມັນຕຈັກຂຸ
ບຸຣຸດຜູ້ຢືນຢູ່ເທິງຍອດເຂົາສີລາລ້ວນ
ເພິ່ງເຫັນໝູ່ຊົນໄດ້ໂດຍຮອບ ສັນໃດ
ພຣະອົງຜູ້ໝົດຄວາມໂສກແລ້ວ
ໂຜດສະເດັດຂຶ້ນສູ່ຜາສາດຄືທຳ
ຈັກໄດ້ເຫັນໝູ່ຊົນຜູ້ຕົກຢູ່ໃນຄວາມໂສກເສົ້າ
ແລະຖືກຊາດຊະຣາຄອບງຳໄດ້ຊັດເຈນ ສັນນັ້ນ
ຂ້າແດ່ພຣະອົງຜູ້ມີຄວາມພຽນ
ຜູ້ຊະນະສົງຄາມ໑ ຜູ້ນຳໝູ່໔ ຜູ້ບໍ່ມີໜີ້໓
ຂໍພຣະອົງໂຜດລຸກຂຶ້ນສະເດັດຈາຣິກໄປໃນໂລກ
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ
ຂໍພຣະອົງໂຜດຈົ່ງຊົງສະແດງທຳ
ຍ້ອນສັດທັງຫລາຍຈັກເປັນຜູ້ຮູ້ທົ່ວເຖິງທຳ"

## ເວໄນຍະສັດປຽບດ້ວຍດອກບົວ

[໓໓໙] ຣາດຊະກຸມານ ຄັ້ງນັ້ນ ອາດຕະມາພາບຮັບຄຳທູນອາຣາດທະນາຂອງພົມ ແລະຍ້ອນອາໄສຄວາມກະລຸນາໃນສັດທັງຫລາຍ ຈຶ່ງກວດເບິ່ງໂລກດ້ວຍພຸດທະຈັກຂຸ໖ ເມື່ອກວດເບິ່ງໂລກດ້ວຍພຸດທະຈັກຂຸໄດ້ເຫັນສັດທັງຫລາຍຜູ້ມີທຸລີໃນດວງຕາການ້ອຍ ມີທຸລີໃນດວງຕາຫຼາຍ ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ສອນໃຫ້ຮູ້ໄດ້ງ່າຍ ສອນໃຫ້ຮູ້ໄດ້ຍາກ ລາງພວກເຫັນປະຣະໂລກແລະໂທສວ່າເປັນສິ່ງເປັນຕາຢ້ານ ລາງພວກເຫັນປະຣະໂລກແລະໂທດ ວ່າເປັນສິ່ງບໍ່ເປັນຕາຢ້ານ

ໃນກໍອຸບົນ(ບົວຂາບ) ໃນກໍປະທຸມະ(ບົວຫລວງ) ຫຼືໃນກໍບຸນທະຣິກ(ບົວຂາວ) ດອກ ອຸບົ ນ ດອກບົວຫຼວງ ດອກບົວຂາວ ລາງດອກທີ່ເກີດໃນນ້ຳ ຈະເລີນໃນນ້ຳ ຍັງບໍ່ພົ້ນນ້ຳ ຈົມຢູ່ ໃຕ້ນ້ຳ ດອກບົວ ແລະມີນ້ຳຫລໍ່ລ້ຽງໄວ້ ດອກບົວຫຼວງ ດອກບົວຂາວ ລາງດອກທີ່ເກີດໃນນ້ຳ ຈະເລີນໃນນ້ຳ ຢູ່ສະເໝີນ້ຳ ດອກບົວ ດອກບົວຫຼວງ ດອກບົວຂາວ ລາງດອກທີ່ເກີດໃນນ້ຳ ຈະເລີນໃນນ້ຳ ຢູ່ພົ້ນນ້ຳ ບໍ່ແຕະນ້ຳ ແມ່ນສັນໃດ ອາດຕະມາພາບເມື່ອກວດເບິ່ງໂລກດ້ວຍພຸດທະຈັກຂຸ ໄດ້ເຫັນສັດທັງຫລາຍຜູ້ມີທຸລີໃນດວງຕານ້ອຍ ມີທຸລີໃນດວງຕາຫຼາຍ ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ສອນໃຫ້ຮູ້ໄດ້ງ່າຍ ສອນໃຫ້ຮູ້ໄດ້ຍາກ ລາງພວກເຫັນປະຣະໂລກແລະໂທສວ່າເປັນສິ່ງເປັນຕາຢ້ານ ລາງພວກເຫັນປະຣະໂລກແລະໂທສວ່າເປັນສິ່ງບໍ່ເປັນຕາຢ້ານ໑ ກໍສັນນັ້ນຄືກັນ

ລຳດັບນັ້ນ ອາດຕະມາພາບໄດ້ກ່າວຄາຖາຕອບທ້າວສະຫຳບໍດີພົມ ວ່າ

"ພົມ ສັດເຫຼົ່າໃດມີໂສຕະປະສາດ
ຈົ່ງປ່ອຍສັດທາມາເທີ້ນ
ເຮົາບໍ່ໄດ້ອັດປະຕູອະມະຕະທຳສຳລັບສັດເຫຼົ່ານັ້ນ
ແຕ່ເຮົາຮູ້ສຶກວ່າເປັນການຍາກລຳບາກ
ຈຶ່ງບໍ່ຄິດຈະສະແດງທຳອັນປະນີດ
ທີ່ເຮົາຊຳນານ ໃນໝູ່ມະນຸດ
ຊົງລຳພຶງເຖິງຜູ້ຄວນຮັບທຳມະເທດສະໜາ

[໓໔໐] ຣາດຊະກຸມານ ຄັ້ງນັ້ນ ສະຫຳບໍດີພົມຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າໄດ້ຊົງປະທານໂອກາດເພື່ອຈະສະແດງທຳແກ່ເຮົາແລ້ວ" ຈຶ່ງຖວາຍອະພິວາດອາດຕະມາພາບ ກະທຳປະທັກຂິນແລ້ວໄດ້ຫາຍໄປຈາກທີ່ນັ້ນ

ຣາດຊະກຸມານ ອາດຕະມາພາບດຳຣິວ່າ "ເຮົາຄວນສະແດງທຳແກ່ໃຜກ່ອນນໍ ໃຜຈັກຮູ້ທຳນີ້ໄດ້ທັນທີ" ແລ້ວດຳຣິຕໍ່ໄປວ່າ "ອາລາຣະດາບົດ ກາລາມະໂຄດນີ້ ເປັນບັນດິດ ສະຫຼາດແຫຼມຄົມ ມີປັນຍາ ມີທຸລີໃນດວງຕານ້ອຍມາດົນ ທາງທີ່ດີ ເຮົາຄວນສະແດງທຳແກ່ອາລາຣະດາບົດ ກາລາມະໂຄດກ່ອນ ທ່ານຈັກຮູ້ທຳນີ້ໄດ້ທັນທີ"

ຄັ້ງນັ້ນ ເທວະດາອົງໜຶ່ງເຂົ້າມາຫາອາດຕະມາພາບແລ້ວກ່າວວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ອາລາຣະດາບົດ ກາລາມະໂຄດ ທຳກາລະໄດ້ ໆ ມື້ແລ້ວ"

ອັນໜຶ່ງ ອາດຕະມາພາບກໍໄດ້ເກີດຍານທັດສະນະຂຶ້ນວ່າ "ອາລາຣະດາບົດ ກາລາມະໂຄດ ທຳກາລະໄດ້ ໆ ມື້ແລ້ວ" ຈຶ່ງດຳຣິວ່າ "ອາລາຣະດາບົດ ກາລາມະໂຄດ ເປັນຜູ້ມີຄວາມ

ເສື່ອມຈາກຄຸນອັນຍິ່ງໃຫຍ່ແລ້ວນໍ ຍ້ອນຖ້າທ່ານໄດ້ຟັງທຳນີ້ ກໍຈະເພິ່ງຮູ້ໄດ້ທັນທີ"

ອາດຕະມາພາບຈຶ່ງດຳຣິວ່າ "ເຮົາຄວນສະແດງທຳແກ່ໃຜກ່ອນນໍ ໃຜຈັກຮູ້ທົ່ວເຖິງທຳ ນີ້ໄດ້ທັນທີ" ຈຶ່ງດຳຣິຕໍ່ໄປວ່າ "ອຸທະກະດາບົດ ຣາມະບຸດນີ້ ເປັນບັນດິດ ສະຫຼາດແຫຼມຄົມມີປັນຍາ ມີທຸລີໃນດວງຕານ້ອຍມາດົນ ທາງທີ່ດີ ເຮົາຄວນສະແດງທຳແກ່ອຸທະກະດາບົດ ຣາມະບຸດກ່ອນ ທ່ານຈັກຮູ້ທຳນີ້ໄດ້ທັນທີ"

ລຳດັບນັ້ນ ເທວະດາອົງໜຶ່ງເຂົ້າມາຫາອາດຕະມາພາບແລ້ວກ່າວວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ອຸທະກະດາບົດ ຣາມະບຸດ ໄດ້ທຳກາລະເມື່ອວານນີ້"

ອັນໜຶ່ງ ອາດຕະມາພາບກໍໄດ້ເກີດຍານທັດສະນະຂຶ້ນວ່າ "ອຸທະກະດາບົດ ຣາມະບຸດໄດ້ທຳກາລະ ເມື່ອວານນີ້" ຈຶ່ງດຳຣິວ່າ "ອຸທະກະດາບົດ ຣາມະບຸດ ເປັນຜູ້ມີຄວາມເສື່ອມຈາກຄຸນອັນຍິ່ງໃຫຍ່ແລ້ວນໍ ຍ້ອນຖ້າທ່ານໄດ້ຟັງທຳນີ້ ກໍຈະເພິ່ງຮູ້ໄດ້ທັນທີ"

## ຊົງພົບອຸປະກາຊີວົກ

[໓໔໑] ຣາດຊະກຸມານ ອາດຕະມາພາບຈຶ່ງດຳຣິວ່າ "ເຮົາຄວນສະແດງທຳແກ່ໃຜກ່ອນນໍໃຜຈັກຮູ້ທຳນີ້ໄດ້ທັນທີ" ຈຶ່ງດຳຣິວ່າ "ພິກຂຸປັນຈະວັກຄີມີອຸປະກາຣະແກ່ເຮົາຫຼາຍ ທີ່ໄດ້ເຝົ້າບຳລຸງຮັກສາເຮົາຜູ້ມຸ້ງພໍ່າເພັງພຽນ ທາງທີ່ດີ ເຮົາຄວນສະແດງທຳແກ່ພິກຂຸປັນຈະວັກຄີກ່ອນ" ແລ້ວດຳຣິຕໍ່ໄປວ່າ "ບັດນີ້ ພິກຂຸປັນຈະວັກຄີຢູ່ທີ່ໃດນໍ?" ກໍໄດ້ເຫັນພິກຂຸປັນຈະວັກຄີຢູ່ທີ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ

ຣາດຊະກຸມານ ຄັ້ງນັ້ນ ອາດຕະມາພາບພັກຢູ່ທີ່ເຂດອຸຣຸເວລາຕາມຄວາມຕ້ອງການແລ້ວຈຶ່ງຫລີກຈາຣິກໄປທາງນະຄອນພາຣານະສີ

ຣາດຊະກຸມານ ອາຊີວົກຊື່ ອຸປະ ກໍໄດ້ພົບອາດຕະມາພາບຜູ້ກຳລັງເດີນທາງໄກໃນລະຫວ່າງ ແມ່ນ້ຳຄະຍາກັບຕົ້ນໂພທິພຶກ ໄດ້ຖາມເຮົາວ່າ "ອາວຸໂສ ອິນຊີຂອງທ່ານຜ່ອງໃສຍິ່ງ ຜິວພັນຂອງທ່ານບໍລິສຸດຜຸດຜ່ອງ ທ່ານບວດອຸທິດໃຜ ໃຜເປັນສາດສະດາຂອງທ່ານ ຫຼືທ່ານຖືກໃຈທຳຂອງໃຜ"

ເມື່ອອຸປະກາຊີວົກຖາມແນວນີ້ແລ້ວ ອາດຕະມາພາບ ຈຶ່ງໄດ້ກ່າວຄາຖາຕອບອຸປະກາຊີວົກວ່າ

"ເຮົາເປັນຜູ້ຄອບງຳທຳທັງປວງ ຮູ້ທຳທັງປວງ
ບໍ່ໄດ້ເປິເປື້ອນໃນທຳທັງປວງ ລະທຳທັງປວງໄດ້ໝົດສິ້ນ

ລຸດພົ້ນຍ້ອນສິ້ນຕັນຫາ ຕັດສະຣູ້ຍິ່ງເອງ
ແລ້ວຈະເພິ່ງກ່າວອ້າງຮອດຜູ້ໃດນໍ?
　　ເຮົາບໍ່ມີອາຈານ ເຮົາບໍ່ມີຜູ້ສະເໝີ
ເຮົາບໍ່ມີຜູ້ທັດທຽມໃນໂລກກັບທັງເທວະໂລກ
　　ຍ້ອນເຮົາເປັນອະຣະຫັນ ເປັນສາດສະດາຜູ້ປະເສີດ
ເຮົາຜູ້ດຽວເປັນຜູ້ຕັດສະຣູ້ເອງໂດຍຖືກຕ້ອງ
ເປັນຜູ້ເຢືອກເຢັນ ດັບກິເລດໃນໂລກໄດ້ແລ້ວ
　　ເຮົາຈະໄປເມືອງຫລວງຂອງຊາວກາສີ ປະກາດທຳມະຈັກ
ຕີກອງອະມະຕະທຳໄປໃນໂລກອັນມີຄວາມມືດມົນ"

ອຸປະກາຊີວົກກ່າວວ່າ "ອາວຸໂສ ທ່ານສົມຄວນເປັນພຣະອະນັນຕະຊິນະຕາມທີ່ທ່ານປະກາດ"

ອາດຕະມາພາບຈຶ່ງກ່າວຕອບ ວ່າ

　　"ຊິນເຫຼົ່າໃດໄດ້ເຖິງຄວາມສິ້ນອາສະວະແລ້ວ
ຊິນເຫຼົ່ານັ້ນຍ່ອມເປັນພຣະຊິນະເຊັ່ນເຮົາ
ອຸປະກະ ເຮົາຊະນະຄວາມຊົ່ວໄດ້ແລ້ວ
ຍ້ອນແນວນັ້ນ ເຮົາຈຶ່ງຊື່ວ່າພຣະຊິນະ"

ເມື່ອອາດຕະມາພາບກ່າວແນວນັ້ນແລ້ວ ອຸປະກາຊີວົກຈຶ່ງກ່າວວ່າ "ອາວຸໂສ ຄວນຈະເປັນແນວນັ້ນ" ແກວງຫົວແລບລີ້ນແລ້ວຍ່າງສວນທາງຫລີກໄປ

## ຊົງສະແດງທຳໂຜດພິກຂຸປັນຈະວັກຄີ

[໓໔໘] ຣາດຊະກຸມານ ລຳດັບນັ້ນ ອາດຕະມາພາບຈາຣິກໄປໂດຍລຳດັບ ເຖິງປ່າອິສິປະຕະນະ-ມະຣິຄະທາຍະວັນ ເຂດນະຄອນພາຣານະສີ ໄດ້ເຂົ້າໄປຫາພິກຂຸປັນຈະວັກຄີຮອດບ່ອນຢູ່ ພິກຂຸປັນຈະວັກຄີເຫັນອາດຕະມາພາບຍ່າງມາແຕ່ໄກ ຈຶ່ງນັດໝາຍກັນແລະກັນວ່າ "ອາວຸໂສ ພຣະສະມະນະໂຄດົມນີ້ເປັນຜູ້ມັກຫຼາຍ ຄາຍຄວາມພຽນ ວຽນມາເພື່ອຄວາມເປັນຄົນມັກຫຼາຍ ກຳລັງສະເດັດມາ ພວກເຮົາບໍ່ເພິ່ງຂາບໄຫວ້ ບໍ່ເພິ່ງລຸກຮັບ ບໍ່ເພິ່ງຮັບບາດແລະຈີວອນຂອງພຣະອົງ ແຕ່ຈະຈັດ ອາສະນະໄວ້ ຖ້າພຣະອົງປາຖະໜາກໍຈັກປະທັບນັ່ງ"

ອາດຕະມາພາບເຂົ້າໄປຫາພິກຂຸປັນຈະວັກຄີ ພິກຂຸປັນຈະວັກຄີກໍລືມຂໍ້ນັດໝາຍຂອງຕົນ ລາງພວກຕ້ອນຮັບອາດຕະມາພາບແລ້ວຮັບບາດແລະຈີວອນ ລາງພວກປູລາດອາສະນະ ລາງ

ພວກຈັດຫານໍ້າລ້າງຕີນ ແຕ່ພິກຂຸປັນຈະວັກຄີຮຽກອາດຕະມາພາບໂດຍອອກນາມ ແລະໃຊ້ຄໍາວ່າ "ອາວຸໂສ"

ເມື່ອພິກຂຸປັນຈະວັກຄີກ່າວແນວນັ້ນແລ້ວ ອາດຕະມາພາບຈຶ່ງຫ້າມພິກຂຸປັນຈະວັກຄີວ່າ "ພິກຂຸທັງຫລາຍ ທ່ານທັງຫລາຍຢ່າຮຽກຕະຖາຄົດໂດຍອອກຊື່ແລະໃຊ້ຄໍາວ່າ "ອາວຸໂສ" ຕະຖາຄົດເປັນອະຣະຫັນ ຕັດສະຣູ້ດ້ວຍຕົນເອງໂດຍຖືກຕ້ອງ ທ່ານທັງຫລາຍຈົ່ງງ່ຽງໂສດສະດັບ ເຮົາຈະສັ່ງສອນອະມະຕະທໍາທີ່ເຮົາໄດ້ບັນລຸແລ້ວ ຈະສະແດງທໍາ ທ່ານທັງຫລາຍເມື່ອປະຕິບັດຕາມທີ່ເຮົາສັ່ງສອນ ບໍ່ດົນປານໃດກໍຈັກເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນແນ່ແທ້"

ເມື່ອອາດຕະມາພາບກ່າວແນວນີ້ແລ້ວ ພິກຂຸປັນຈະວັກຄີໄດ້ກ່າວກັບອາດຕະມາພາບວ່າ "ອາວຸໂສໂຄດົມ ແມ່ນດ້ວຍຈະຣິຍານັ້ນ ດ້ວຍປະຕິປະທານັ້ນ ດ້ວຍທຸກກອນກິຣິຍານັ້ນ ພຣະອົງກໍຍັງ ບໍ່ໄດ້ບັນລຸຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທໍາຂອງມະນຸດ ບັດນີ້ ພຣະອົງເປັນຜູ້ມັກຫຼາຍ ຄາຍຄວາມພຽນ ວຽນມາເພື່ອຄວາມເປັນຄົນມັກຫຼາຍ ແລ້ວເປັນຫຍັງຈັກໄດ້ບັນລຸຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທໍາຂອງມະນຸດໄດ້ນໍ?"

ເມື່ອພິກຂຸປັນຈະວັກຄີກ່າວແນວນັ້ນແລ້ວ ອາດຕະມາພາບຈຶ່ງໄດ້ກ່າວກັບພິກຂຸປັນຈະວັກຄີວ່າ "ພິກຂຸທັງຫລາຍ ຕະຖາຄົດບໍ່ໄດ້ເປັນຄົນມັກຫຼາຍ ບໍ່ໄດ້ຄາຍຄວາມພຽນ ບໍ່ໄດ້ ວຽນມາເພື່ອຄວາມເປັນຄົນມັກຫຼາຍ ຕະຖາຄົດເປັນອະຣະຫັນຕ໌ຕັດສະຣູ້ເອງໂດຍຖືກຕ້ອງ ທ່ານທັງຫລາຍ ຈົ່ງງ່ຽງໂສດສະດັບ ເຮົາຈະສັ່ງສອນອະມະຕະທໍາທີ່ເຮົາໄດ້ບັນລຸແລ້ວ ຈະສະແດງທໍາທ່ານທັງຫລາຍ ເມື່ອປະຕິບັດຕາມທີ່ເຮົາສັ່ງສອນ ບໍ່ດົນປານໃດກໍຈັກເຮັດໃຫ້ແຈ້ງປະໂຫຍດຍອດຢ້ຽມອັນເປັນທີ່ສຸດ ແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນໄດ້ແນ່ນອນ"

ແມ່ນເທື່ອທີ ໒ ພິກຂຸປັນຈະວັກຄີກໍໄດ້ກ່າວກັບອາດຕະມາພາບວ່າ ຯລຯ

ແມ່ນເທື່ອທີ ໒ ອາດຕະມາພາບກໍໄດ້ກ່າວກັບພິກຂຸປັນຈະວັກຄີວ່າ ຯລຯ

ແມ່ນເທື່ອທີ ໓ ພິກຂຸປັນຈະວັກຄີກໍໄດ້ກ່າວກັບອາດຕະມາພາບວ່າ "ອາວຸໂສໂຄດົມແມ່ນດ້ວຍຈະຣິຍານັ້ນ ດ້ວຍປະຕິປະທານັ້ນ ດ້ວຍທຸກກອນກິຣິຍານັ້ນ ພຣະອົງກໍຍັງບໍ່ໄດ້ບັນລຸຍານທັດສະໃນທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທໍາຂອງມະນຸດໄດ້ ບັດນີ້ ພຣະອົງເປັນຜູ້ມັກຫຼາຍຄາຍຄວາມພຽນ ວຽນມາເພື່ອຄວາມເປັນຄົນມັກຫຼາຍ ແລ້ວເປັນຫຍັງ ຈັກບັນລຸຍານທັດສະໃນທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທໍາຂອງມະນຸດໄດ້ນໍ?"

ເມື່ອພິກຂຸປັນຈະວັກຄີກ່າວແນວນີ້ແລ້ວ ອາດຕະມາພາບໄດ້ກ່າວກັບພິກຂຸປັນຈະວັກຄີວ່າ "ພິກຂຸທັງຫລາຍ ທ່ານທັງຫລາຍຍັງຈື່ໄດ້ບໍ່ວ່າ ຄຳເວົ້າແນວນີ້ເຮົາໄດ້ເຄີຍກ່າວມາກ່ອນໜ້ານີ້"

ພິກຂຸປັນຈະວັກຄີກ່າວວ່າ "ຄຳເວົ້າແນວນີ້ບໍ່ເຄີຍໄດ້ຟັງມາກ່ອນ ຂ້ານ້ອຍ"

ອາດຕະມາພາບຈຶ່ງກ່າວວ່າ "ພິກຂຸທັງຫລາຍ ຕະຖາຄົດເປັນອະຣະຫັນ ຕັດສະຣູ້ດ້ວຍຕົນເອງໂດຍຖືກຕ້ອງ ທ່ານທັງຫລາຍຈົ່ງງ່ຽງໂສດສະດັບ ເຮົາຈະສັ່ງສອນອະມະຕະທຳທີ່ເຮົາບັນລຸແລ້ວ ຈະສະແດງທຳ ທ່ານທັງຫລາຍເມື່ອປະຕິບັດຕາມທີ່ເຮົາສັ່ງສອນ ບໍ່ດົນປານໃດກໍຈັກເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນໄດ້ແນ່ນອນ"

ເມື່ອອາດຕະມາພາບ ສາມາດກ່າວໃຫ້ພິກຂຸປັນຈະວັກຄີຍອມຮັບຟັງໄດ້ແລ້ວ ອາດຕະມາພາບຈຶ່ງເລີ່ມສອນ ພິກຂຸ ໔ ຮູບ ພິກຂຸ ໓ ຮູບກໍທ່ຽວບິນທະບາດ ເຮົາທັງ ໖ ສັນບິນທະບາດທີ່ພິກຂຸ ໓ ຮູບ ນຳມາ ອາດຕະມາພາບກ່າວສອນພິກຂຸ ໓ ຮູບ ພິກຂຸ ໔ ຮູບກໍທ່ຽວບິນທະບາດເຮົາທັງ ໖ ສັນບິນທະບາດທີ່ພິກຂຸ ໔ ຮູບນຳມາ

## ຊົງແກ້ບັນຫາຂອງໂພທິຣາດຊະກຸມານ

[໓໔໓] ຄັ້ງນັ້ນ ພິກຂຸປັນຈະວັກຄີທີ່ອາດຕະມາພາບສັ່ງສອນ ແລະ ພ່ຳສອນຢູ່ແນວນີ້ ບໍ່ດົນປານໃດກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຊອບທຳປາຖະໜາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ໂພທິຣາດຊະກຸມານໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອພິກຂຸໄດ້ພຣະຕະຖາຄົດເປັນຜູ້ແນະນຳດົນພຽງໃດນໍ ຈຶ່ງເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຊອບທຳປາຖະໜາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຣາດຊະກຸມານ ຖ້າເຊັ່ນນັ້ນ ໃນຂໍ້ນີ້ອາດຕະມາພາບຂໍຍ້ອນຖາມພຣະອົງກ່ອນ ພຣະອົງເພິ່ງຕອບຕາມທີ່ພໍພຣະທະໄທ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ພຣະອົງເປັນຜູ້ສະຫຼາດໃນສິລະປະ ຄື ການຊົງຊ້າງ ການໃຊ້ຂໍຊ້າງ ບໍ່ແມ່ນບໍ?"

ໂພທິຣາດຊະກຸມານທູລວ່າ "ແມ່ນ ຂ້ານ້ອຍ ຂ້າພຣະອົງເປັນຜູ້ສະຫຼາດໃນສິລະປະຄື ການຊົງຊ້າງ ການໃຊ້ຂໍຊ້າງ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຣາດຊະກຸມານ ພຣະອົງຊົງເຂົ້າພຣະຫະໄທຄວາມຂໍ້ນັ້ນວ່າແນວໃດ? ບຸຣຸດມາໃນເມືອງນີ້ດ້ວຍເຂົ້າໃຈວ່າ "ໂພທິຣາດຊະກຸມານຊົງຮູ້ສິລະປະຄືການຊົງຊ້າງ ການໃຊ້ຂໍຊ້າງ ເຮົາຈັກສຶກສາສິລະປະຄືການຂີ່ຊ້າງ ການໃຊ້ຂໍຊ້າງໃນສຳນັກຂອງໂພທິຣາດຊະກຸມານນັ້ນ" ແຕ່ເຂົາບໍ່ມີສັດທາ ຈຶ່ງບໍ່ບັນລຸຜົນທີ່ທີ່ບຸກຄົນຜູ້ມີສັດທາຈະເພິ່ງບັນລຸ ເຂົາມີສຸກາພາບ ມີໂຣຄາພາດຫຼາຍ ຈຶ່ງບໍ່ບັນລຸຜົນທີ່ກັບຄົນທີ່ມີສຸກພາບມີໂຣຄາພາດໜ້ອຍຈະເພິ່ງບັນລຸ ເຂົາເປັນຄົນໂອ້ອວດ ມີມານຍາ ຈຶ່ງບໍ່ບັນລຸຜົນທີ່ທີ່ບຸກຄົນຜູ້ບໍ່ໂອ້ອວດ ບໍ່ມີມານຍາຈະເພິ່ງບັນລຸ ເຂົາເປັນຜູ້ຂີ້ຄ້ານ ຈຶ່ງບໍ່ບັນລຸຜົນທີ່ທີ່ບຸກຄົນຜູ້ຜາຣົບຄວາມພຽນຈະເພິ່ງ ບັນລຸ ແລະ ເຂົາເປັນຜູ້ມີປັນຍາຊາມຈຶ່ງບໍ່ບັນລຸຜົນທີ່ທີ່ບຸກຄົນຜູ້ມີປັນຍາຈະເພິ່ງບັນລຸ

ຣາດຊະກຸມານ ພຣະອົງຊົງເຂົ້າພຣະຫະໄທຄວາມຂໍ້ນັ້ນວ່າແນວໃດ ບຸຣຸດນັ້ນຄວນສຶກສາສິລະປະ ຄື ການຂີ່ຊ້າງ ການໃຊ້ຂໍຊ້າງໃນສຳນັກຂອງພຣະອົງແດ່ບໍ?"

ໂພທິຣາດຊະກຸມານທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ບຸຣຸດນັ້ນແມ່ນຈະປະກອບດ້ວຍອົງປະກອບແຕ່ລະແນວ ກໍບໍ່ຄວນສຶກສາສິລະປະ ຄື ການຂີ່ຊ້າງ ການໃຊ້ຂໍຊ້າງໃນສຳນັກຂອງຂ້ານ້ອຍ ບໍ່ຈະຕ້ອງກ່າວເຖິງອົງປະກອບທັງ ໕ ຂໍ້"

[໓໔໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຣາດຊະກຸມານ ພຣະອົງຊົງເຂົ້າພຣະຫະໄທຄວາມຂໍ້ນັ້ນວ່າແນວໃດ ປຽບຄື ບຸຣຸດມາເມືອງນີ້ດ້ວຍເຂົ້າໃຈວ່າ "ໂພທິຣາດຊະກຸມານ ຊົງຮູ້ສິລະປະຄືການຊົງຊ້າງ ການໃຊ້ຂໍຊ້າງ ເຮົາຈັກສຶກສາສິລະປະຄືການຂີ່ຊ້າງ ການໃຊ້ ຂໍຊ້າງໃນສຳນັກຂອງໂພທິຣາດຊະກຸມານນັ້ນ" ເຂົາເປັນຜູ້ມີສັດທາ ຈຶ່ງບັນລຸຜົນທີ່ທີ່ບຸກຄົນ ຜູ້ມີສັດທາຈະເພິ່ງບັນລຸ ເຂົາມີໂຣຄາພາດໜ້ອຍ ຈຶ່ງບັນລຸຜົນທີ່ທີ່ຄົນຜູ້ມີໂຣຄາພາດໜ້ອຍຈະເພິ່ງບັນລຸ ເຂົາເປັນຄົນບໍ່ໂອ້ອວດ ບໍ່ມີມານຍາ ຈຶ່ງບັນລຸຜົນທີ່ທີ່ບຸກຄົນຜູ້ບໍ່ໂອ້ອວດ ບໍ່ມີມານຍາຈະເພິ່ງບັນລຸ ເຂົາເປັນຜູ້ຜາຣົບຄວາມພຽນ ຈຶ່ງບັນລຸຜົນທີ່ທີ່ບຸກຄົນຜູ້ຜາຣົບ ຄວາມພຽນຈະເພິ່ງບັນລຸ ແລະເຂົາເປັນຜູ້ມີປັນຍາຈຶ່ງບັນລຸຜົນທີ່ທີ່ບຸກຄົນຜູ້ມີປັນຍາຈະເພິ່ງບັນລຸ

ຣາດຊະກຸມານ ພຣະອົງຊົງເຂົ້າພຣະຫະໄທຄວາມຂໍ້ນັ້ນວ່າແນວໃດ ບຸຣຸດນັ້ນຄວນຈະສຶກສາສິລະປະຄືການຂີ່ຊ້າງ ການໃຊ້ຂໍຊ້າງໃນສຳນັກຂອງພຣະອົງແດ່ບໍ?"

ໂພທິຣາດຊະກຸມານທູລວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ບຸຣຸດນັ້ນແມ່ນຈະປະກອບດ້ວຍອົງປະກອບແຕ່ລະແນວກໍຄວນສຶກສາສິລະປະຄືການຂີ່ຊ້າງ ການໃຊ້ຂໍຊ້າງໃນສຳນັກຂອງ ຂ້ານ້ອຍໄດ້ ບໍ່ຈະຕ້ອງກ່າວເຖິງອົງປະກອບທັງ ໕ ຂໍ້"

พระผู้มีพระพาภเจ้าตัดว่า "ธาดชะภุมาน อົງຂອງພິກຂຸຜູ້ມີຄວາມພຽນ ໕ ປະການ ນີ້ກໍແນວນັ້ນຄືກັນ

ອົງຂອງພິກຂຸຜູ້ມີຄວາມພຽນ ໕ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສັດທາ ເຊື່ອປັນຍາເຄື່ອງຕັດສະຮູ້ຂອງຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍ ພຣະອົງເອງໂດຍຊອບທຳ ພຽບພ້ອມດ້ວຍວິດຊາ ແລະ ຈະຣະໃນສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດເປັນສາດສະດາຂອງ ເທວະດາ ແລະມະນຸດທັງຫລາຍ ເປັນພຣະພຸດທະເຈົ້າເປັນພຣະຜູ້ມີພຣະພາກເຈົ້າ"

໒. ເປັນຜູ້ມີສຸກຂະພາບ ມີໂຣຄາພາດໜ້ອຍ ປະກອບດ້ວຍໄຟທາດສຳລັບຍ່ອຍອາຫານສະໝ່ຳສະເໝີ ບໍ່ເຢັນຫຼາຍ ບໍ່ຮ້ອນຫຼາຍ ປານກາງພໍເໝາະແກ່ການພ່ຳເພັງພຽນ

໓. ເປັນຜູ້ບໍ່ໂອ້ອວດ ບໍ່ມີມານຍາ ເປີດເຜີຍຕົນຕາມຄວາມເປັນຈິງໃນສາດສະດາ ຫຼືໃນເພື່ອນພົມມະຈາຣີຜູ້ຮູ້ທັງຫລາຍ

໔. ເປັນຜູ້ພາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອຍັງກຸສົນທຳໃຫ້ເຖິງພ້ອມ ເປັນຜູ້ມີກຳລັງ ມີຄວາມບາກບັ່ນໝັ້ນຄົງ ບໍ່ທອດຖິ້ມທຸລະໃນກຸສົນທຳທັງຫລາຍ

໕. ເປັນຜູ້ມີປັນຍາ ປະກອບດ້ວຍປັນຍາທີ່ເປັນອະຣິຍະ ເຫັນຄວາມເກີດແລະຄວາມດັບ ສາມາດທຳລາຍກິເລດໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ

ຣາດຊະກຸມານ ນີ້ແລ ຄື ອົງຂອງພິກຂຸຜູ້ມີຄວາມພຽນ ໕ ປະການ

[໓໔໕] ຣາດຊະກຸມານ ພິກຂຸຜູ້ປະກອບດ້ວຍອົງແຫ່ງຄວາມພຽນ ໕ ປະການນີ້ ເມື່ອໄດ້ຕະຖາຄົດເປັນຜູ້ແນະນຳ ຈະເພິ່ງເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນໄດ້ ໃຊ້ເວລາພຽງ ໗ ປີ

ຣາດຊະກຸມານ ບໍ່ຕ້ອງເຖິງ ໗ ປີ ພິກຂຸຜູ້ປະກອບດ້ວຍອົງແຫ່ງຄວາມພຽນ ໕ ປະການ

ນີ້ ເມື່ອໄດ້ຕະຖາຄົດເປັນຜູ້ແນະນຳ ຈະເພິ່ງເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຊອບທຳປາຖະໜາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນໄດ້ ໃຊ້ເວລາພຽງ ໖ ປີ ຯລຯ ໕ ປີຯລຯ ໔ ປີ ຯລຯ ໓ ປີ ຯລຯ ໒ ປີ ຯລຯ ໑ ປີ

ธາດຊະກຸມານ ບໍ່ຕ້ອງເຖິງ ໑ ປີ ພິກຂຸຜູ້ປະກອບດ້ວຍອົງແຫ່ງຄວາມພຽນ ໕ ປະການນີ້ ເມື່ອໄດ້ຕະຖາຄົດເປັນຜູ້ແນະນຳ ຈະເພິ່ງເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນໄດ້ ໃຊ້ເວລາພຽງ ໗ ເດືອນ

ธາດຊະກຸມານ ບໍ່ຕ້ອງເຖິງ ໗ ເດືອນ ພິກຂຸຜູ້ປະກອບດ້ວຍອົງແຫ່ງຄວາມພຽນ ໕ ປະການນີ້ ເມື່ອໄດ້ຕະຖາຄົດເປັນຜູ້ແນະນຳ ຈະເພິ່ງເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດ ໂດຍຊອບທຳປາຖະໜາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນໄດ້ ໃຊ້ເວລາພຽງ ໖ ເດືອນ ຯລຯ ໕ ເດືອນ ຯລຯ ໔ ເດືອນ ຯລຯ ໓ ເດືອນ ຯລຯ ໒ ເດືອນ ຯລຯ ໑ ເດືອນ ຯລຯ ເຄິ່ງເດືອນ

ธາດຊະກຸມານ ບໍ່ຕ້ອງເຖິງເຄິ່ງເດືອນ ພິກຂຸຜູ້ປະກອບດ້ວຍອົງແຫ່ງຄວາມພຽນ ໕ ປະການນີ້ ເມື່ອໄດ້ຕະຖາຄົດເປັນຜູ້ແນະນຳ ຈະເພິ່ງເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດ ໂດຍຊອບທຳປາຖະໜາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນໄດ້ ໃຊ້ເວລາພຽງ ໗ ຄືນ ໗ ມື້

ธາດຊະກຸມານ ບໍ່ຕ້ອງເຖິງ ໗ ຄືນ ໗ ມື້ ພິກຂຸຜູ້ປະກອບດ້ວຍອົງແຫ່ງຄວາມພຽນ ໕ ປະການນີ້ ເມື່ອໄດ້ຕະຖາຄົດເປັນຜູ້ແນະນຳ ຈະເພິ່ງເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ ອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດ ໂດຍຊອບທຳຕ້ອງການ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນໄດ້ ໃຊ້ເວລາພຽງ ໖ ຄືນ ໖ ມື້ ຯລຯ ໕ ຄືນ ໕ ມື້ ຯລຯ ໔ ຄືນ ໔ ມື້ ຯລຯ ໓ ຄືນ ໓ ມື້ ຯລຯ ໒ ຄືນ ໒ ມື້ ຯລຯ ໑ ຄືນ ໑ ມື້

ธາດຊະກຸມານ ບໍ່ຕ້ອງເຖິງ ໑ ຄືນ ໑ ມື້ ພິກຂຸຜູ້ປະກອບດ້ວຍອົງແຫ່ງຄວາມພຽນ ໕ ປະການນີ້ ເມື່ອໄດ້ຕະຖາຄົດເປັນຜູ້ແນະນຳ ມີຕະຖາຄົດສັ່ງສອນໃນເວລາຄ່ຳ ກໍຈັກບັນລຸ ຄຸນວິເສດໄດ້ໃນເວລາເຊົ້າ ມີຕະຖາຄົດສັ່ງສອນໃນເວລາເຊົ້າ ກໍຈັກບັນລຸຄຸນວິເສດໄດ້ໃນເວລາຄ່ຳ”

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ໂພທິธາດຊະກຸມານໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ “ພຣະພຸດທະເຈົ້າມີຄຸນໜ້າອັດສະຈັນຈິງ ພຣະທຳມີຄຸນໜ້າອັດສະຈັນຈິງ ພຣະທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວໜ້າອັດສະຈັນຈິງ ຍ້ອນພິກຂຸທີ່ພຣະຕະຖາຄົດຊົງ

ສັ່ງສອນໃນເວລາຄ່ຳ ຈັກບັນລຸຄຸນວິເສດໃນເວລາເຊົ້າ ພິກຂຸທີ່ພຣະຕະຖາຄົດຊົງສັ່ງສອນໃນເວລາເຊົ້າ ຈັກບັນລຸຄຸນວິເສດໃນເວລາຄ່ຳ”

## ໂພທິຣາດຊະກຸມານເຖິງພຣະຣັດຕະນະໄຕຣ
## ເປັນສະຣະນະຕັ້ງແຕ່ຢູ່ໃນທ້ອງ

[໓໔໕] ເມື່ອໂພທິຣາດຊະກຸມານຕັດແນວນີ້ແລ້ວ ມານົບສັນຊິກາບຸດໄດ້ຂາບທູນໂພທິຣາດຊະກຸມານ ວ່າ

“ທ່ານໂພທິຣາຊະພຣະອົງນີ້ຊົງປະກາດໄວ້ວ່າ “ພຣະພຸດທະເຈົ້າມີຄຸນໜ້າອັດສະຈັນຈິງ ພຣະທຳມີຄຸນໜ້າອັດສະຈັນຈິງ ພຣະທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວໜ້າອັດສະຈັນຈິງ” ແຕ່ພຣະອົງບໍ່ຊົງເຖິງພຣະໂຄດົມ ຜູ້ຈະເລີນພຣະອົງນັ້ນ ພ້ອມທັງພຣະທຳແລະພຣະສົງເປັນສະຣະນະ”

ໂພທິຣາດຊະກຸມານຕັດວ່າ “ສັນຊິກາບຸດເພື່ອນຮັກ ທ່ານຢ່າໄດ້ກ່າວແນວນັ້ນ ສັນຊິກາບຸດເພື່ອນຮັກ ທ່ານຢ່າໄດ້ກ່າວແນວນັ້ນ ເລື່ອງນັ້ນເຮົາໄດ້ຟັງມາແລ້ວ ໄດ້ຮັບມາ ຕໍ່ພຣະພັກຂອງພຣະຣາຊະມານດາຂອງເຮົາແລ້ວ ຄື ຄັ້ງໜຶ່ງ(ເທື່ອທີ ໑) ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ທີ່ໂຄສິຕາຣາມ ເຂດນະຄອນໂກສຳພີ ຂະນະນັ້ນ ສະເດັດແມ່ຂອງເຮົາກຳລັງຊົງ ພຣະທ້ອງ ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຊົງຖວາຍອະພິວາດພຣະຜູ້ມີ ພຣະພາກແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ລູກຄົນທີ່ຢູ່ໃນທ້ອງຂອງຂ້ານ້ອຍນີ້ຈະເປັນຊາຍກໍຕາມ ເປັນຍິງກໍຕາມ ເຂົາຍ່ອມເຖິງພຣະຜູ້ມີພຣະພາກເຈົ້າພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈຳເຂົາວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ”

ຄັ້ງໜຶ່ງ(ເທື່ອທີ ໒) ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ທີ່ເພສະກະລາມີ້ ສະຖານທີ່ໃຫ້ອະໄພ ໝູ່ເນື້ອ ເຂດນະຄອນສຸງສຸມາຣະຄິຣະ ແຄວັນພັກຄະນີ້ ເວລານັ້ນ ແມ່ນມອຸ້ມເຮົາໃສ່ສະເອວພາເຂົ້າໄປ ເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວໄດ້ຢືນຢູ່ທີ່ທີ່ສົມຄວນ ໄດ້ຂາບທູນ ພຣະຜູ້ມີພຣະພາກເຈົ້າວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ໂພທິຣາດຊະກຸມານພຣະອົງນີ້ ຍ່ອມເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳໂພທິຣາດຊະກຸມານນັ້ນວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ”

ສັນຊິກາບຸດເພື່ອນຮັກ ແມ່ນເທື່ອທີ ໓ ເຮົານີ້ຍ່ອມເຖິງພຣະຜູ້ມີພຣະພາກເຈົ້າພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈືຂ້ານ້ອຍວ່າເປັນອຸປາ

ສິກ ຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ” ດັ່ງນີ້ແລ

**ໂພທິຣາດຊະກຸມານສູດທີ ៥ ຈົບ**

# ៦. ອັງຄຸລິມາລະສູດ

## ວ່າດ້ວຍໂຈນຊື່ອົງຄຸລິມານ

## ພຣະພຸດທະເຈົ້າສະເດັດໂຜດໂຈນຊື່ອົງຄຸລິມານ

[໓໔໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນແລ ໃນແຄວັນຂອງພຣະເຈົ້າປະເສນທິໂກສົນ ມີໂຈນຊື່ ອົງຄຸລິມານ ເປັນຄົນຫຍາບຊ້າ ມີຝາມືເປື້ອນເລືອດ ມັກຂ້າຄົນ ບໍ່ມີຄວາມກະລຸນາໃນສັດທັງຫລາຍ ໂຈນອົງຄຸລິມານນັ້ນ ກໍ່ກວນຊາວບ້ານແດ່ ຊາວນິຄົມແດ່ ຊາວຊົນນະບົດແດ່ ໃຫ້ເດືອດຮ້ອນໄປທົ່ວ ເຂົາເຂັ່ນຂ້າມະນຸດແລ້ວຕັດເອົານິ້ວມືຮ້ອຍເປັນພວງມາລັຍໃສ່(ຄໍ)ໄວ້ ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກຖືບາດແລະຈີວອນ ສະເດັດເຂົ້າໄປບິນທະບາດໃນກຣຸງສາວັດຖີ ຊົງທ່ຽວບິນທະບາດໃນນະຄອນສາວັດຖີແລ້ວ ສະເດັດກັບຈາກບິນທະບາດ ພາຍຫລັງສະເຫວີຍພຣະກະຍາຫານສຳເລັດແລ້ວ ຊົງຖືຮັກສາເສນາສະນະ ຖືບາດແລະຈີວອນສະເດັດໄປ ຕາມທາງທີ່ໂຈນອົງຄຸລິມານຊຸ່ມຢູ່ ພວກຄົນລ້ຽງງົວ ພວກຄົນລ້ຽງສັດພວກຊາວນາ ທີ່ຍ່າງມາພົບພຣະຜູ້ມີພຣະພາກເຈົ້າຜູ້ສະເດັດໄປຕາມທາງທີ່ໂຈນອົງຄຸລິມານຊຸ່ມຢູ່ຈຶ່ງຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

“ຂ້າແດ່ ພຣະສະມະນະ ຢ່າສະເດັດໄປທາງນັ້ນ ໃນທາງນັ້ນມີໂຈນຊື່ ອົງຄຸລິມານ ເປັນຄົນຫຍາບຊ້າ ມີຝາມືເປື້ອນເລືອດ ມັກຂ້າຄົນ ບໍ່ມີຄວາມກະລຸນາໃນສັດທັງຫລາຍ ໂຈນອົງຄຸລິມານນັ້ນ ກໍ່ກວນຊາວບ້ານແດ່ ຊາວນິຄົມແດ່ ຊາວຊົນນະບົດແດ່ ໃຫ້ເດືອດຮ້ອນໄປທົ່ວ ເຂົາເຂັ່ນຂ້າມະນຸດແລ້ວ ຕັດເອົານິ້ວມືຮ້ອຍເປັນພວງມາລັຍຮອຍຄໍ

ຂ້າແດ່ ພຣະສະມະນະ ຄົນທີ່ຈະເດີນທາງນີ້ຕ້ອງລວມພວກກັນໃຫ້ໄດ້ ໑໐ ຄົນແດ່ ២໐ ຄົນແດ່ ໓໐ ຄົນແດ່ ៤໐ ຄົນແດ່ ៥໐ ຄົນແດ່ ເຖິງຢ່າງນັ້ນກໍຍັງຕົກຢູ່ໃນເງື້ອມມືຂອງໂຈນ ອົງຄຸລິມານຈົນໄດ້”

ເມື່ອການພວກນັ້ນຂາບທູນແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າຊົງນິ່ງເສີຍ ສະເດັດຕໍ່ໄປ

ແມ່ນເທື່ອທີ ໔ ພວກຄົນລ້ຽງງົວ ພວກຄົນລ້ຽງສັດ ພວກຊາວນາທີ່ຍ່າງມາກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະສະມະນະ ຢ່າສະເດັດໄປທາງນັ້ນ ໃນທາງນັ້ນມີໂຈນຊື່ອົງຄຸລິມານ ເປັນຄົນຫຍາບຊ້າ ມີຝ່າມືເປື້ອນເລືອດ ມັກຂ້າຄົນ ບໍ່ມີຄວາມກະລຸນາໃນສັດທັງຫລາຍ ໂຈນອົງຄຸລິມານນັ້ນ ກໍ່ກວນຊາວບ້ານແດ່ ຊາວນິຄົມແດ່ ຊາວຊົນນະບົດແດ່ໃຫ້ເດືອດຮ້ອນໄປທົ່ວ ເຂົາເຂັ່ນຂ້າມະນຸດແລ້ວຕັດເອົານິ້ວມືຮ້ອຍເປັນພວງມາລັຍຮ້ອຍຄໍ

ຂ້າແດ່ພຣະສະມະນະ ຄົນທີ່ຈະເດີນທາງນີ້ຕ້ອງລວມພວກກັນໃຫ້ໄດ້ ໑໐ ຄົນແດ່ ໒໐ ຄົນແດ່ ໓໐ ຄົນແດ່ ໔໐ ຄົນແດ່ ໕໐ ຄົນແດ່ ເຖິງຢ່າງນັ້ນກໍຍັງຕົກຢູ່ໃນເງື້ອມມືຂອງໂຈນອົງຄຸລິມານຈົນໄດ້"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງນິ່ງເສີຍ ສະເດັດຕໍ່ໄປ

ແມ່ນເທື່ອທີ ໓ ພວກຄົນລ້ຽງງົວ ພວກຄົນລ້ຽງສັດ ພວກຊາວນາທີ່ຍ່າງມາກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະສະມະນະ ຢ່າສະເດັດໄປທາງນັ້ນ ໃນທາງນັ້ນມີໂຈນຊື່ອົງຄຸລິມານ ເປັນຄົນຫຍາບຊ້າ ມີຝ່າມືເປື້ອນເລືອດ ມັກຂ້າຄົນ ບໍ່ມີຄວາມກະລຸນາໃນສັດທັງຫລາຍ ໂຈນ ອົງຄຸລິມານນັ້ນ ກໍ່ກວນຊາວບ້ານແດ່ ຊາວນິຄົມແດ່ ຊາວຊົນນະບົດແດ່ ໃຫ້ເດືອດຮ້ອນໄປທົ່ວ ເຂົາເຂັ່ນຂ້າມະນຸດແລ້ວຕັດເອົານິ້ວມືຮ້ອຍເປັນພວງມາລັຍຮອຍຄໍ

ຂ້າແດ່ ພຣະສະມະນະ ຄົນທີ່ຈະເດີນທາງນີ້ຕ້ອງລວມພວກກັນໃຫ້ໄດ້ ໑໐ ຄົນແດ່ ໒໐ ຄົນແດ່ ໓໐ ຄົນແດ່ ໔໐ ຄົນແດ່ ໕໐ ຄົນແດ່ ເຖິງຢ່າງນັ້ນກໍຍັງຕົກຢູ່ໃນເງື້ອມມືຂອງໂຈນອົງຄຸລິມານຈົນໄດ້"

[໓໔໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງນິ່ງເສີຍສະເດັດຕໍ່ໄປ ໂຈນອົງຄຸລິມານໄດ້ເຫັນພຣະຜູ້ມີພຣະພາກເຈົ້າສະເດັດມາແຕ່ໄກ ໄດ້ຄິດວ່າ "ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ຄົນທີ່ຍ່າງມາທາງນີ້ຈະຕ້ອງລວມພວກກັນໃຫ້ໄດ້ ໑໐ ຄົນແດ່ ໒໐ ຄົນແດ່ ໓໐ ຄົນແດ່ ໔໐ ຄົນແດ່ ໕໐ ຄົນແດ່ ເຖິງຢ່າງນັ້ນກໍຍັງຕົກຢູ່ໃນເງື້ອມມືຂອງເຮົາ ແຕ່ເປັນຫຍັງ ສະມະນະນີ້ພຽງຮູບດຽວ ບໍ່ມີເພື່ອນຈັກຄົນ ຖ້າວ່າຈະມາຂົ່ມເຮົາ ທາງທີ່ດີ ເຮົາເພິ່ງຂ້າສະມະນະອົງນີ້ສາ"

ລຳດັບນັ້ນ ໂຈນອົງຄຸລິມານຖືດາບແລະໂລ່ມັດສອດແລ່ງທະນູໄວ້ພ້ອມ ຕິດຕາມພຣະຜູ້ມີ

ພຣະພາກໄປທາງເບື້ອງພຣະປຣິດສະດາງ ພຣະຜູ້ມີພຣະພາກເຈົ້າຊົງບັນດານອິດທາພິສັງຂານ ໂດຍວິທີ ທີ່ໂຈນອົງຄຸລິມານຈະແລ່ນຈົນສຸດກຳລັງ ກໍບໍ່ສາມາດຈະຕາມທັນພຣະຜູ້ມີພຣະພາກ ເຈົ້າຜູ້ສະເດັດໄປຕາມປົກກະຕິໄດ້ ຄັ້ງນັ້ນ ໂຈນອົງຄຸລິມານໄດ້ມີຄວາມຄິດ ວ່າ

"ໜ້າອັດສະຈັນຈິງ ບໍ່ເຄີຍພົບກໍດີ ແຕ່ກ່ອນແມ່ນຊ້າງທີ່ກຳລັງແລ່ນ ມ້າທີ່ກຳລັງແລ່ນ ລົດ ທີ່ກຳລັງແລ່ນ ເນື້ອທີ່ກຳລັງແລ່ນ ເຮົາກໍຍັງແລ່ນຕາມທັນຈັບໄດ້ ແຕ່ເຮົາແລ່ນຈົນສຸດກຳລັງຍັງບໍ່ ທັນສະມະນະຮູບນີ້ເຊິ່ງຍ່າງຕາມປົກກະຕິໄດ້" ຈຶ່ງຢຸດຢືນກ່າວກັບພຣະຜູ້ມີພຣະພາກເຈົ້າວ່າ "ຢຸດ ກ່ອນ ສະມະນະ ຢຸດກ່ອນສະມະນະ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເຮົາຢຸດແລ້ວ ອົງຄຸລິມານ ທ່ານຕ່າງຫາກທີ່ຍັງບໍ່ຢຸດ"

ຈາກນັ້ນ ໂຈນອົງຄຸລິມານຄິດວ່າ "ສະມະນະເຫລົ່ານີ້ເປັນສາກະຍະບຸດມັກເປັນຄົນເວົ້າ ຈິງ ມີປະຕິຍານຈິງ ແຕ່ສະມະນະຮູບນີ້ຍ່າງໄປຢູ່ແທ້ ໆ ກັບເວົ້າວ່າ "ເຮົາຢຸດແລ້ວ ອົງຄຸລິມານ ທ່ານຕ່າງຫາກຍັງບໍ່ຢຸດ" ທາງທີ່ດີ ເຮົາຄວນຈະຖາມສະມະນະຮູບນີ້ເບິ່ງກ່ອນ"

## ອົງຄຸລິມານລະພະຍົດ

[໓໔໙] ລຳດັບນັ້ນ ໂຈນອົງຄຸລິມານໄດ້ຖາມພຣະຜູ້ມີພຣະພາກເຈົ້າ ດ້ວຍຄາຖາວ່າ

"ສະມະນະ ທ່ານກຳລັງຍ່າງຢູ່ແທ້ ໆ ຍັງກ້າເວົ້າວ່າ
"ເຮົາຢຸດແລ້ວ ທ່ານຕ່າງຫາກຍັງບໍ່ຢຸດ"
ກັບກ່າວຫາຂ້າພະເຈົ້າຜູ້ຢຸດແລ້ວວ່າຍັງບໍ່ຢຸດ
ສະມະນະ ຂ້າພະເຈົ້າຂໍຖາມເນື້ອຄວາມນີ້ກັບທ່ານ
ທ່ານຢຸດແນວໃດ? ຂ້າພະເຈົ້າບໍ່ຢຸດແນວໃດ?"

ພຣະຜູ້ມີພຣະພາກເຈົ້າ ຕັດຕອບວ່າ

"ອົງຄຸລິມານ ເຮົາວາງອາດຍາອາວຸດ
ໃນສັບພະສັດທັງຫຼາຍໄດ້ແລ້ວ
ຈຶ່ງຊື່ວ່າຢຸດແລ້ວຕະຫລອດການ
ສ່ວນທ່ານບໍ່ສັງລວມໃນສັດທັງຫລາຍ
ຍ້ອນແນວນັ້ນ ເຮົາຈຶ່ງຊື່ວ່າຢຸດແລ້ວ
ສ່ວນທ່ານນັ້ນຊື່ວ່າຍັງບໍ່ຢຸດ"

ໂຈນອົງຄຸລິມານກ່າວວ່າ

"ສະມະນະ ດົນແທ້ນໍ ທ່ານຜູ້ທີ່ເທວະດາ
ແລະມະນຸດບູຊາແລ້ວ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ສະເດັດມາເຖິງປ່າໃຫຍ່ເພື່ອອະນຸເຄາະຂ້າພຣະອົງ
ຂ້າພຣະອົງນັ້ນຈັກລະການເຮັດບາບ
ຍ້ອນຟັງຄາຖາອັນປະກອບດ້ວຍທຳຂອງພຣະອົງ"
ໂຈນອົງຄຸລິມານໄດ້ກ່າວແນວນີ້ແລ້ວ
ຖິ້ມດາບແລະອາວຸດລົງໃນເຫວເລິກ ມີໜ້າຜາສູງຊັນ
ໂຈນອົງຄຸລິມານໄດ້ຖວາຍອະພິວາດພຣະບາດທັງສອງຂອງພຣະສຸຄົດ
ແລ້ວທູນຂໍບັນພະຊາກັບພຣະສຸຄົດ ໃນບ່ອນນັ້ນເອງ
ພຣະພຸດທະເຈົ້າຊົງປະກອບດ້ວຍພຣະກະລຸນາຄຸນ
ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ເປັນສາດສະດາຂອງໂລກ
ພ້ອມທັງເທວະໂລກ
ໄດ້ຕັດກັບໂຈນອົງຄຸລິມານໃນເວລານັ້ນວ່າ
"ມາເຖີດ ທ່ານຈົ່ງເປັນພິກຂຸມາເທີ້ນ"
ນີ້ແລ ເປັນພິກຂຸພາວະຂອງໂຈນອົງຄຸລິມານນັ້ນ

## ພຣະເຈົ້າປະເສນທິໂກສົນເຂົ້າເຝົ້າ

[໓໕໐] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າມີທ່ານພຣະອົງຄຸລິມານເປັນປັດສາສະມະໃນ ສະເດັດຫລີກຈາຣິກໄປທາງນະຄອນສາວັດຖີ ຊົງທ່ຽວຈາຣິກໄປໂດຍລຳດັບ ສະເດັດເຖິງນະຄອນສາວັດຖີແລ້ວ ໄດ້ຂ່າວວ່າ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເຊຕະວັນອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ໝູ່ຊົນຈຳນວນຫຼາຍປະຊຸມກັນຢູ່ທີ່ປະຕູພະຣາດຊະວັງຂອງພຣະເຈົ້າປະເສນທິໂກສົນ ສົ່ງສຽງດັງອື້ອຶງວ່າ

"ຂ້າແດ່ ສົມມຸດເທບ ໃນແຄວັ້ນຂອງພຣະອົງມີໂຈນຊື່ອົງຄຸລິມານ ເປັນຄົນຫຍາບຊ້າ ມີຝາມືເປື້ອນເລືອດ ມັກຂ້າຄົນ ບໍ່ມີຄວາມກະລຸນາໃນສັດທັງຫລາຍ ໂຈນອົງຄຸລິມານນັ້ນ ກໍ່ກວນຊາວບ້ານແດ່ ຊາວນິຄົມແດ່ ຊາວຊົນນະບົດແດ່ໃຫ້ເດືອດຮ້ອນໄປທົ່ວ ເຂົາເຂັ່ນຂ້າ ພວກມະນຸດແລ້ວຕັດເອົານິ້ວມືຮ້ອຍເປັນພວງມາລັຍໃສ່ໄວ້ ຂໍສົມມຸດເທບຈົ່ງຊົງກຳຈັດມັນສາເທີ້ນ"

ຕໍ່ມາ ພຣະເຈົ້າປະເສນທິໂກສົນສະເດັດອອກຈາກນະຄອນສາວັດຖີ ດ້ວຍຂະບວນມ້າປະມານ ໕໐໐ ໂຕ ສະເດັດເຂົ້າໄປທາງພຣະອາຣາມແຕ່ຍັງເວັນຢ່າງແນ່ນອນ ສະເດັດໄປຈົນສຸດທາງທີ່ຍານພາຫະນະ ຈະໄປໄດ້ແລ້ວລົງຈາກຍານ ສະເດັດພຣະຣາດຊະດຳເນີນດ້ວຍພຣະບາດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວ

ປະທັບນັ່ງຢູ່ບ່ອນທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າຕັດຖາມພຣະເຈົ້າປະເສນທິໂກສົນວ່າ “ມະຫາບໍພິດ ເຈົ້າແຜ່ນດິນມະຄົດຈອມເສນາ ຊົງພຣະນາມວ່າພິມພິສານ ຊົງເຮັດໃຫ້ພຣະອົງຊົງຂັດເຄືອງ ເຈົ້າລິດສະຫວີເມືອງເວສາລີ ຫຼື ພຣະຣາຊາຜູ້ເປັນປະຕິປັກເຫຼົ່າອື່ນຊົງເຮັດໃຫ້ພຣະອົງຂັດເຄືອງບໍ?”

ພຣະເຈົ້າປະເສນທິໂກສົນຂາບທູນວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ເຈົ້າແຜ່ນດິນມະຄົດຈອມເສນາ ຊົງພຣະນາມວ່າພິມພິສານ ບໍ່ໄດ້ຊົງເຮັດໃຫ້ຂ້ານ້ອຍຂັດເຄືອງ ແມ່ນເຈົ້າລິດສະຫວີຜູ້ຄອງນະຄອນເວສາລີກໍບໍ່ໄດ້ຊົງເຮັດໃຫ້ຂ້ານ້ອຍຂັດເຄືອງ ແມ່ນພຣະຣາຊາທີ່ເປັນປະຕິປັກເຫຼົ່າອື່ນ ກໍບໍ່ໄດ້ຊົງເຮັດໃຫ້ຂ້ານ້ອຍຂັດເຄືອງເຊັ່ນກັນ ໃນແຄວ້ນຂອງຂ້ານ້ອຍ ມີໂຈນຊື່ອົງຄຸລິມານ ເປັນຄົນຫຍາບຊ້າ ມີຝາມືເປື້ອນເລືອດ ມັກຂ້າຄົນ ບໍ່ມີຄວາມກະລຸນາໃນສັດທັງຫລາຍ ໂຈນອົງຄຸລິມານນັ້ນກໍ່ກວນຊາວບ້ານແດ່ ຊາວນິຄົມແດ່ ຊາວຊົນນະບົດແດ່ໃຫ້ເດືອດຮ້ອນໄປທົ່ວ ເຂົາເຂັ່ນຂ້າພວກມະນຸດແລ້ວຕັດເອົານິ້ວມືຮ້ອຍເປັນພວງມາລັຍໃສ່ໄວ້ ຂ້ານ້ອຍຈັກໄປກຳຈັດມັນສາ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ມະຫາບໍພິດ ຖ້າພຣະອົງຈະເພິ່ງພົບອົງຄຸລິມານຜູ້ແຖຜົມແລະໜວດນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ ເວັ້ນຈາກການ ຂ້າສັດເວັ້ນຈາກການລັກຊັບ ເວັ້ນຈາກການເວົ້າຕົວະ ສັນພັດຕາຫານຄາບດຽວ ເປັນພົມມະຈາຣີ ມີສີນມີກັນລະຍານະທຳ ພຣະອົງສົມຄວນຈະຈັດການກັບເຂົາຢ່າງໃດ?”

ພຣະເຈົ້າປະເສນທິໂກສົນຂາບທູນວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍຄວນຂາບໄຫວ້ ລຸກຮັບ ນິມົນໃຫ້ນັ່ງ ຫຼື ເຈາະຈົງນິມົນທ່ານດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ຫຼືຄວນຈັດການອາຮັກຂາຄຸ້ມຄອງປ້ອງກັນ ຕາມຄວາມເໝາະສົມ

ຂ້າແດ່ ພຣະອົງຜູ້ຈະເລີນ ແຕ່ໂຈນອົງຄຸລິມານນັ້ນ ເປັນຄົນທຸສິນ ມີບາບທຳ ຈັກມີຄວາມສັງລວມດ້ວຍສິນເຫັນຢູ່ແນວນັ້ນໄດ້ມາແຕ່ໃສ?”

ສະໄໝນັ້ນ ທ່ານພຣະອົງຄຸລິມານນັ່ງຢູ່ໃນບ່ອນບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຊົງຍົກພຣະຫັດເບື້ອງຂວາຂຶ້ນຊີ້ຕັດບອກພຣະເຈົ້າປະເສນທິໂກສົນວ່າ “ມະຫາບໍພິດນັ້ນຄື ອົງຄຸລິມານ”

ທັນໃດນັ້ນ ພຣະເຈົ້າປະເສນທິໂກສົນຊົງມີຄວາມຢ້ານ ມີຄວາມຫວາດຫວັ່ນ ມີພຣະໂລມະຊາດຊູຊັນ (ມີຂົນຫົວລຸກ) ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ພຣະເຈົ້າປະເສນທິໂກສົນຊົງຢ້ານຊົງຫວາດຫວັ່ນ ມີພຣະໂລມະຊາດຊູຊັນ ຈຶ່ງຕັດກັບພຣະເຈົ້າປະເສນທິໂກສົນວ່າ “ຢ່າຊົງຢ້ານເລີຍ ມະຫາບໍພິດ ຢ່າຊົງຢ້ານເລີຍ ມະຫາບໍພິດ ອົງຄຸລິມານນີ້ບໍ່ມີອັນຕະລາຍຕໍ່ພຣະອົງ”

ຈາກນັ້ນ ພຣະເຈົ້າປະເສນທິໂກສົນຊົງລະງັບຄວາມຢ້ານ ຄວາມຫວາດຫວັ່ນຫຼືພຣະໂລມະຊາດທີ່ຊູຊັນໄດ້ແລ້ວ ຈຶ່ງສະເດັດເຂົ້າໄປຫາທ່ານພຣະອົງຄຸລິມານຮອດບ່ອນຢູ່ ແລ້ວໄດ້ຕັດຖາມທ່ານພຣະອົງຄຸລິມານວ່າ "ພຣະຜູ້ເປັນເຈົ້າຊື່ວ່າອົງຄຸລິມານ ແມ່ນບໍ?"

ທ່ານພຣະອົງຄຸລິມານຖວາຍພຣະພອນວ່າ "ແມ່ນແລ້ວ ມະຫາບໍພິດ"

ພຣະເຈົ້າປະເສນທິໂກສົນຕັດຖາມວ່າ "ບິດາຂອງພຣະຜູ້ເປັນເຈົ້າມີໂຄດແນວໃດ? ມານດາຂອງພຣະຜູ້ເປັນເຈົ້າມີໂຄດແນວໃດ?"

ທ່ານພຣະອົງຄຸລິມານຖວາຍພຣະພອນວ່າ "ມະຫາບໍພິດ ບິດາຊື່ ຄັກຄະ ມານດາຊື່ ມັນຕານີ"

ພຣະເຈົ້າປະເສນທິໂກສົນຕັດວ່າ "ຂໍພຣະຜູ້ເປັນເຈົ້າຄັກຄະມັນຕານີບຸດຈົ່ງອະພິຣົມເທີ້ນ ຂ້ານ້ອຍຈັກທຳຄວາມຂົນຂວາຍເພື່ອຖວາຍຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານແດ່ພຣະຜູ້ເປັນເຈົ້າຄັກຄະມັນຕານີບຸດເອງ"

[໓໕໑] ສະໄໝນັ້ນ ທ່ານພຣະອົງຄຸລິມານຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຖືການທ່ຽວບິນທະບາດເປັນຂໍ້ວັດປະຕິບັດ ຖືຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ຖືໄຕຣຈີວອນເປັນຂໍ້ວັດປະຕິບັດ ຄັ້ງນັ້ນ ທ່ານພຣະອົງຄຸລິມານ ຈຶ່ງຖວາຍພຣະພອນພຣະເຈົ້າປະເສນທິໂກສົນວ່າ "ຢ່າເລີຍ ມະຫາບໍພິດ ໄຕຣຈີວອນຂອງອາດຕະມາພາບມີຄົບແລ້ວ"

ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຈຶ່ງປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະຜູ້ມີພຣະພາກເຈົ້າຊົງເຝິກບຸກຄົນທີ່ໃຜ ໆ ເຝິກບໍ່ໄດ້ ຊົງເຮັດບຸກຄົນທີ່ໃຜ ໆ ເຮັດໃຫ້ສະງົບບໍ່ໄດ້ໃຫ້ສະງົບໄດ້ ຊົງເຮັດບຸກຄົນທີ່ໃຜ ໆ ດັບບໍ່ໄດ້ໃຫ້ດັບໄດ້ ຍ້ອນວ່າຂ້ານ້ອຍທັງທີ່ມີອາດຍາ ມີອາວຸດຢູ່ພ້ອມ ກໍບໍ່ສາມາດຈະເຝິກຜູ້ໃດໄດ້ ແຕ່ພຣະຜູ້ມີພຣະພາກເຈົ້າບໍ່ມີອາດຍາ ບໍ່ມີອາວຸດເລີຍ ຍັງເຝິກ ຜູ້ນັ້ນໄດ້

ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າເຊັ່ນນັ້ນ ບັດນີ້ ຂ້ານ້ອຍຂໍທູນລາກັບ ຍ້ອນມີກິດ ມີໜ້າທີ່ທີ່ຈະຕ້ອງເຮັດອີກຫຼາຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຂໍມະຫາບໍພິດ ຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

ລຳດັບນັ້ນ ພຣະເຈົ້າປະເສນທິໂກສົນຊົງລຸກຈາກທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວສະເດັດຈາກໄປ

# ພຣະອົງຄຸລິມານໂຜດແມ່ຍິງຖືພາ

ເມື່ອເວລາເຊົ້າ ທ່ານພຣະອົງຄຸລິມານຄອງອັນຕະຣະວາສົກຖືບາດ ແລະຈີວອນເຂົ້າໄປບິນທະບາດໃນກຣຸງສາວັດຖີ ກຳລັງທ່ຽວບິນທະບາດໄປຕາມລຳດັບຮ່ອມຢູ່ໃນນະຄອນສາວັດຖີ ໄດ້ເຫັນສະຕີຄົນໜຶ່ງມີທ້ອງແກ່ໃກ້ຄອດ ຈຶ່ງຄິດວ່າ "ສັດທັງຫລາຍຍ່ອມເສົ້າໝອງນໍ ສັດທັງຫລາຍຍ່ອມເສົ້າໝອງນໍ" ຈາກນັ້ນ ທ່ານພຣະອົງຄຸລິມານກໍທ່ຽວບິນທະບາດໃນນະຄອນສາວັດຖີ ກັບຈາກບິນທະບາດພາຍຫລັງສັນພັດຕາຫານສຳເລັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ເຊົ້າມື້ນີ້ ຂ້າພຣະອົງຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະບາດໃນກຣຸງສາວັດຖີ ກຳລັງທ່ຽວບິນທະບາດໄປຕາມລຳດັບ ຮ່ອມຢູ່ໃນນະຄອນສາວັດຖີ ໄດ້ເຫັນສະຕີຖືພາແກ່ໃກ້ຄອດຄົນໜຶ່ງ ຈຶ່ງຄິດວ່າ "ສັດທັງຫລາຍ ເສົ້າໝອງນໍ ສັດທັງຫລາຍເສົ້າໝອງແທ້ນໍ" ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອົງຄຸລິມານ ຖ້າເຊັ່ນນັ້ນ ທ່ານຈົ່ງເຂົ້າໄປຫາສະຕີນັ້ນຮອດບ່ອນຢູ່ແລ້ວກ່າວແນວນີ້ວ່າ "ນາງ ຕັ້ງແຕ່ອາດຕະມາພາບເກີດມາ ບໍ່ຮູ້ຈັກການຈົ່ງໃຈປົງຊີວິດສັດເລີຍ ດ້ວຍສັດຈະວາຈານີ້ ຂໍຄວາມປອດໄພຈົ່ງມີແກ່ທ່ານ ຂໍຄວາມປອດໄພຈົ່ງມີແກ່ເດັກອ່ອນໃນທ້ອງຂອງທ່ານເທີ້ນ"

ທ່ານພຣະອົງຄຸລິມານຂາບທູນວ່າ "ກໍການເວົ້າເຊັ່ນນັ້ນຈັກເປັນອັນວ່າຂ້າພຣະອົງ ກ່າວຕົວະທັງທີ່ຮູ້ຢູ່ບໍ່ແມ່ນບໍ? ຍ້ອນວ່າຂ້າພຣະອົງເຄີຍຈົ່ງໃຈປົງຊີວິດສັດມາຫຼາຍແລ້ວ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອົງຄຸລິມານ ຖ້າເຊັ່ນນັ້ນ ທ່ານຈົ່ງເຂົ້າໄປຫາສະຕີນັ້ນເຖິງທີ່ຢູ່ແລ້ວກ່າວແນວນີ້ວ່າ "ນາງ ຕັ້ງແຕ່ອາດຕະມາພາບເກີດມາໂດຍອະຣິຍະຊາດ ບໍ່ຮູ້ຈັກການຈົ່ງໃຈປົງຊີວິດສັດເລີຍ ດ້ວຍສັດຈະວາຈານີ້ ຂໍຄວາມປອດໄພຈົ່ງມີແກ່ທ່ານ ຂໍຄວາມປອດໄພ ຈົ່ງມີແກ່ເດັກອ່ອນໃນທ້ອງຂອງທ່ານເທີ້ນ"

ທ່ານພຣະອົງຄຸລິມານທູນຮັບສະໜອງພຣະດຳຣັດແລ້ວ ເຂົ້າໄປຫາຍິງນັ້ນຮອດບ່ອນຢູ່ແລ້ວໄດ້ກ່າວວ່າ "ນາງ ຕັ້ງແຕ່ອາດຕະມາພາບເກີດມາໂດຍອະຣິຍະຊາດ ບໍ່ຮູ້ຈັກການຈົ່ງໃຈປົງຊີວິດສັດເລີຍ ດ້ວຍສັຈຈະວາຈານີ້ ຂໍຄວາມປອດໄພຈົ່ງມີແກ່ທ່ານ ຂໍຄວາມປອດໄພຈົ່ງມີແກ່ເດັກອ່ອນໃນທ້ອງຂອງທ່ານເທີ້ນ"

ທັນໃດນັ້ນ ຄວາມປອດໄພໄດ້ມີແກ່ສະຕີນັ້ນ ຄວາມປອດໄພໄດ້ມີແກ່ເດັກອ່ອນໃນທ້ອງຂອງສະຕີນັ້ນແລ້ວ

## ພຣະອົງຄຸລິມານບັນລຸອະຣະຫັດຕະຜົນ

ຕໍ່ມາ ທ່ານພຣະອົງຄຸລິມານຫລີກອອກໄປຢູ່ຮູບດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ເປັນອັນວ່າ ທ່ານພຣະອົງຄຸລິມານ ໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫລາຍ ດ້ວຍອາການຢ່າງນີ້

[໓໕໘] ເມື່ອເວລາເຊົ້າ ທ່ານພຣະອົງຄຸລິມານຄອງອັນຕະຣະວາສົກຖືບາດ ແລະຈີວອນເຂົ້າໄປບິນທະບາດໃນກຣຸງສາວັດຖີ ສະໄໝນັ້ນ ກ້ອນດິນທີ່ບຸກຄົນທັງຫລາຍດຶກໄປທາງອື່ນກໍມາຕົກລົງໃສ່ກາຍຂອງທ່ານພຣະອົງຄຸລິມານ ໄມ້ຄ້ອນທີ່ບຸກຄົນທັງຫລາຍດຶກໄປທາງອື່ນກໍມາຕົກລົງໃສ່ກາຍຂອງທ່ານພຣະອົງຄຸລິມານ ກ້ອນຫີນທີ່ບຸກຄົນທັງຫລາຍດຶກໄປທາງອື່ນກໍມາຕົກລົງໃສ່ກາຍຂອງທ່ານພຣະອົງຄຸລິມານ ທ່ານພຣະອົງຄຸລິມານມີຫົວແຕກ ເລືອດໄຫຼໃສ່ບາດ ມີບາກແຕກ ຜ້າສັງຄາຕິກໍຂາດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນທ່ານພຣະອົງຄຸລິມານກຳລັງຍ່າງມາແຕ່ໄກ ໄດ້ຕັດກັບທ່ານພຣະອົງຄຸລິມານ ວ່າ

"ທ່ານຈົ່ງອົດກັ້ນໄວ້ເທີ້ນພາມ ທ່ານຈົ່ງອົດກັ້ນໄວ້ເທີ້ນພາມ ທ່ານໄດ້ສະເຫວີຍວິບາກກຳເຊິ່ງເປັນເຫດໃຫ້ທ່ານມີກໄໝ້ຢູ່ໃນນະຮົກຫຼາຍປີ ຫລາຍຮ້ອຍປີ ຫຼາຍພັນປີ ໃນປັດຈຸບັນນີ້ແລ້ວ"

## ພຣະອົງຄຸລິມານເປ່ງອຸທານ

ຄັ້ງນັ້ນແລ ທ່ານພຣະອົງຄຸລິມານຢູ່ໃນທີ່ສະຫງັດ ຫຼີບຫຼີກຢູ່ ສະເຫວີຍວິມຸດຕິສຸກແລ້ວໄດ້ເປ່ງອຸທານນີ້ໃນເວລານັ້ນ ວ່າ

"ຄົນທີ່ຜະໝາດມາກ່ອນ ຕໍ່ມາພາຍຫລັງ ບໍ່ຜະໝາດ
ເຂົາຍ່ອມເຮັດໂລກນີ້ໃຫ້ສະຫວ່າງສະໄຫວໄດ້
ເໝືອນດວງຈັນທີ່ພົ້ນຈາກກ້ອນເຟື້ອສັນນັ້ນ
ຄົນທີ່ເຮັດບາບກຳແລ້ວອັດໄວ້ໄດ້ດ້ວຍກຸສົນ
ຍ່ອມຈະເຮັດໂລກນີ້ໃຫ້ສະຫວ່າງສະໄຫວໄດ້
ເໝືອນດວງຈັນທີ່ພົ້ນຈາກກ້ອນເຟື້ອສັນນັ້ນ

ເຊັ່ນດຽວກັນແລ ພິກຂຸທີ່ຍັງໜຸ່ມແໜ້ນ
ຂົນຂວາຍຢູ່ໃນພຣະພຸດທະສາດສະໜາ
ກໍຍ່ອມເຮັດໂລກນີ້ໃຫ້ສະຫວ່າງສະໄຫວໄດ້
ເໝືອນດວງຈັນທີ່ພົ້ນແລ້ວຈາກກ້ອນເພື້ອສັນນັ້ນ
ຂໍສັດຕູທັງຫລາຍຂອງເຮົາເພິ່ງຟັງທຳກະຖາເທີ້ນ
ຂໍສັດຕູທັງຫລາຍຂອງເຮົາຈົ່ງຂົນຂວາຍໃນພຣະພຸດທະສາດສະໜາເທີ້ນ
ຂໍອະມະນຸດທັງຫລາຍທີ່ເປັນສັດຕູຂອງເຮົາ
ຈົ່ງຄົບສັດຕະບຸຣຸດຜູ້ຊວນໃຫ້ຢຶດຖືທຳເທີ້ນ
ຂໍສັດຕູທັງຫລາຍຂອງເຮົາຈົ່ງໄດ້ຮັບຄວາມຜ່ອງແຜ້ວຄືຂັນຕິ
ແລະສັນເສີນຄວາມບໍ່ໂກດເທີ້ນ
ຂໍຈົ່ງຟັງທຳຕາມການແລະຈົ່ງປະຕິບັດຕາມທຳນັ້ນເທີ້ນ
ຜູ້ທີ່ເປັນສັດຕູນັ້ນບໍ່ຄວນບຽດບຽນເຮົາຫຼືໃຜ ໆ ອື່ນເລີຍ
ຂໍໃຫ້ບັນລຸຄວາມສະງົບອັນເຢືອກເຢັນ
ແລ້ວຖືຮັກສາຄຸ້ມຄອງຜູ້ມີຕັນຫາແລະປາສະຈາກຕັນຫາ
ຄົນທົດນ້ຳຍ່ອມດຶງນ້ຳໄປໄດ້
ຊ່າງສອນຍ່ອມດັດສອນໃຫ້ກົງໄດ້
ຊ່າງຖາກຍ່ອມຖາກໄມ້ໄດ້ ສັນໃດ
ບັນດິດທັງຫລາຍຍ່ອມເຝິກຕົນໄດ້ ສັນນັ້ນ
ຄົນລາງພວກຍ່ອມເຝິກສັດ ດ້ວຍອາດຍາແດ່
ດ້ວຍຂໍແດ່ ດ້ວຍແສ້ແດ່
ເຮົາເປັນຜູ້ທີ່ພຣະຜູ້ມີພຣະພາກເຈົ້າຜູ້ໝັ້ນຄົງ
ຜູ້ບໍ່ມີອາດຍາ ບໍ່ມີອາວຸດ ເຝິກແລ້ວ
ແຕ່ກ່ອນເຮົາມີຊື່ວ່າ ອະຫິງສະກະ ແຕ່ຍັງບຽດບຽນຜູ້ອື່ນຢູ່
ມື້ນີ້ເຮົາມີຊື່ກົງຄວາມຈິງ ເຮົາບໍ່ບຽດບຽນຜູ້ໃດ ແລ້ວ
ແຕ່ກ່ອນເຮົາເປັນໂຈນຜາກົດຊື່ອົງຄຸລິມານ
ເຮົານັ້ນເມື່ອຖືກກິເລດຄືແມ່ນ້ຳໃຫຍ່ພັດໄປມາ
ຈຶ່ງໄດ້ເຖິງພຣະພຸດທະເຈົ້າເປັນສະຣະນະ
ແຕ່ກ່ອນເຮົາມີມືເປື້ອນເລືອດ ຜາກົດຊື່ວ່າ ອົງຄຸລິມານ
ທ່ານຈົ່ງເບິ່ງການທີ່ເຮົາເຖິງພຣະພຸດທະເຈົ້າວ່າເປັນສະຣະນະ
ເຮົາຖອນຕັນຫາອັນຈະນຳໄປສູ່ພົບໄດ້ແລ້ວ
ຫລັງຈາກເຮັດກຳອັນເປັນເຫດໃຫ້ເຖິງທຸຄະຕິເຊັ່ນນັ້ນໄວ້ຫຼາຍແລ້ວ

ເຮົາຜູ້ໄດ້ຮັບວິບາກກຳນັ້ນແລ້ວ
ຈຶ່ງເປັນຜູ້ບໍ່ມີໜີ້ບໍຣິໂພກ
ພວກຊົນພານປັນຍາຊາມ ມົວແຕ່ຜະໝາດ
ສ່ວນປາດທັງຫລາຍຖືຮັກສາຄວາມບໍ່ຜະໝາດ
ຄືຖືຮັກສາຊັບອັນປະເສີດສັນນັ້ນ
ພວກທ່ານຈຶ່ງຢ່າຜະໝາດ ຢ່າຄຸກຄີໃນກາມ
ຍ້ອນວ່າຜູ້ບໍ່ຜະໝາດເພ່ງຢູ່ເປັນນິດ
ຍ່ອມປະສົບສຸກອັນໄພບູນ
ການທີ່ເຮົາມາສູ່ພຣະພຸດທະສາດສະໜານີ້ນັ້ນ ມາຖືກທາງແລ້ວ
ບໍ່ຂາດປະໂຫຍດ ຄິດບໍ່ຜິດແລ້ວ
ໃນບັນດາທຳທີ່ພຣະຜູ້ມີພຣະພາກເຈົ້າຊົງຈຳແນກໄວ້ດີແລ້ວ
ເຮົາໄດ້ເຂົ້າເຖິງທຳອັນປະເສີດສຸດແລ້ວ
ການທີ່ເຮົາໄດ້ເຂົ້າເຖິງທຳອັນປະເສີດສຸດນີ້ນັ້ນ
ເຂົ້າເຖິງແນວຖືກຕ້ອງ ບໍ່ຂາດປະໂຫຍດ
ຄິດບໍ່ຜິດແລ້ວ ວິດຊາ ໓ ເຮົາກໍບັນລຸແລ້ວ
ຄຳສອນຂອງພຣະພຸດທະເຈົ້າເຮົາກໍເຮັດຕາມແລ້ວ" ດັ່ງນີ້ແລ

**ອົງຄຸລິມານສູດທີ ໖ ຈົບ**

## ໗. ປິຍະຊາຕິກະສູດ

### ວ່າດ້ວຍທຸກເກີດຈາກສິ່ງເປັນທີ່ຮັກ

### ລູກຊາຍຄົນດຽວຂອງຄະຫະບໍດີຕາຍ

[໓໕໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະ-ເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນແລ ລູກຊາຍຄົນດຽວເຊິ່ງເປັນທີ່ຮັກເປັນທີ່ພໍໃຈຂອງຄະຫະບໍດີຄົນໜຶ່ງເສຍຊີວິດລົງ ຍ້ອນການເສຍຊີວິດຂອງລູກຊາຍຄົນດຽວນັ້ນ ການງານກໍບໍ່ເປັນອັນເຮັດ ອາຫານກໍບໍ່ເປັນອັນກິນ ຄະຫະບໍດີນັ້ນໄດ້ໄປສູ່ປ່າຊ້າ ໄຫ້ຈົ່ມເຖິງລູກຊາຍວ່າ "ລູກໂທນ ເຈົ້າຢູ່ໃສນໍ? ລູກໂທນ ເຈົ້າຢູ່ໃສນໍ?"

ຈາກນັ້ນ ຄະຫະບໍດີນັ້ນໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດພຣະຜູ້ມີ ພຣະພາກແລ້ວຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບຄະຫະບໍດີນັ້ນວ່າ "ຄະຫະບໍດີ ໃຈຂອງທ່ານບໍ່ມີອິນຊີໄວ້ຢຶດໜ່ວງ ອິນຊີ (ຮ່າງກາຍ) ຂອງທ່ານກໍໝອງແຫຼ້ໄປ"

ຄະຫະບໍດີນັ້ນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ແລ້ວເປັນຫຍັງ ອິນຊີຂອງຂ້າພຣະອົງ ຈະບໍ່ໝອງແຫຼ້ໄປນໍ? ຍ້ອນລູກຊາຍຄົນດຽວເຊິ່ງເປັນທີ່ຮັກເປັນທີ່ພໍໃຈຂອງຂ້າພຣະອົງໄດ້ເສຍຊີວິດລົງ ຍ້ອນການເສັຍຊີວິດຂອງລູກຊາຍຄົນດຽວນັ້ນ ການງານກໍບໍ່ເປັນອັນເຮັດ ອາຫານກໍບໍ່ເປັນອັນກິນ ຂ້າພຣະອົງໄປປ່າຊ້າ ໄຫ້ຈົ່ມເຖິງລູກຊາຍນັ້ນວ່າ "ລູກໂທນ ເຈົ້າຢູ່ໃສນໍ? ລູກໂທນ ເຈົ້າຢູ່ໃສນໍ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຂໍ້ນີ້ ເປັນແນວນັ້ນ ຄະຫະບໍດີ ຂໍ້ນີ້ເປັນແນວນັ້ນ ຄະຫະບໍດີ ຍ້ອນວ່າ ໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມໄຫ້ຈົ່ມ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະອຸປາຍາດ (ຄວາມຄັບແຄ້ນໃຈ) ເກີດຈາກສິ່ງອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກ"

ຄະຫະບໍດີຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ການທີ່ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ເກີດຈາກສິ່ງອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກນັ້ນ ຈັກເປັນແນວນັ້ນໄປໄດ້ແນວໃດ ແທ້ຈິງ ຄວາມຍິນດີ ແລະ ໂສມະນັດ (ຄວາມດີໃຈ) ເກີດຈາກສິ່ງອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກຕ່າງຫາກ"

ຈາກນັ້ນ ຄະຫະບໍດີບໍ່ຍິນດີບໍ່ຄັດຄ້ານພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ລຸກຈາກບ່ອນນັ່ງແລ້ວຈາກໄປ

[໓໕໔] ສະໄໝນັ້ນ ນັກເລງສະກາເປັນຈຳນວນຫລາຍຫລິ້ນສະກາກັນຢູ່ໃນບ່ອນບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ ຂະນະນັ້ນເອງ ຄະຫະບໍດີນັ້ນເຂົ້າໄປຫານັກເລງສະກາເຫຼົ່ານັ້ນແລ້ວເລົ່າເລື້ອງໃຫ້ຟັງວ່າ

"ທ່ານຜູ້ຈະເລີນທັງຫຼາຍ ຂໍໂອກາດ ຂ້າພະເຈົ້າໄດ້ເຂົ້າໄປເຝົ້າພຣະສະມະນະໂຄດົມຮອດບ່ອນຢູ່ ຖວາຍອະພິວາດພຣະສະມະນະໂຄດົມແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະສະມະນະໂຄດົມໄດ້ຕັດກັບຂ້າພະເຈົ້າ ວ່າ "ຄະຫະບໍດີ ໃຈຂອງທ່ານບໍ່ມີອິນຊີໄວ້ຢຶດໜ່ວງ ອິນຊີຂອງທ່ານກໍໝອງແຫຼ້ໄປ"

ເມື່ອພຣະສະມະນະໂຄດົມຕັດແນວນີ້ແລ້ວ ຂ້າພະເຈົ້າໄດ້ຂາບທູນພຣະສະມະນະໂຄດົມ

ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ເປັນຫຍັງອິນຊີຂອງຂ້າພຣະອົງຈະບໍ່ໝອງແຫຼ້ໄປນໍ ຍ້ອນລູກຊາຍຄົນດຽວເຊິ່ງເປັນທີ່ຮັກ ເປັນທີ່ພໍໃຈຂອງຂ້າພຣະອົງໄດ້ເສຍຊີວິດລົງ ຍ້ອນການເສຍຊີວິດຂອງລູກຊາຍຄົນດຽວນັ້ນ ການງານກໍບໍ່ເປັນອັນເຮັດ ອາຫານກໍບໍ່ເປັນອັນກິນ ຂ້າພຣະອົງໄປ ປ່າຊ້າໄຫ້ຈົ່ມເຖິງລູກຊາຍນັ້ນວ່າ "ລູກໂທນ ເຈົ້າຢູ່ໃສນໍ? ລູກໂທນ ເຈົ້າຢູ່ໃສນໍ?"

ພຣະສະມະນະໂຄດົມໄດ້ຕັດວ່າ "ຂໍ້ນີ້ເປັນແນວນັ້ນ ຄະຫະບໍດີ ຂໍ້ນີ້ເປັນແນວນັ້ນ ຄະຫະບໍດີ ຍ້ອນວ່າໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ເກີດຈາກສິ່ງອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກ"

ຂ້າພະເຈົ້າໄດ້ຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ການທີ່ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ເກີດຈາກສິ່ງອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກນັ້ນ ຈັກເປັນແນວນັ້ນໄປໄດ້ແນວໃດ ຂ້າແດ່ພຣະອົງຜູ້ຈະເລີນ ແທ້ຈິງ ຄວາມຍິນດີ ແລະໂສມະນັດ ເກີດຈາກສິ່ງອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກນັ້ນຕ່າງຫາກ"

ທ່ານຜູ້ຈະເລີນທັງຫຼາຍ ຈາກນັ້ນ ຂ້າພະເຈົ້າບໍ່ຍິນດີບໍ່ຄັດຄ້ານພຣະພາສິດຂອງພຣະສະມະນະໂຄດົມ ລຸກຈາກບ່ອນນັ່ງແລ້ວຈາກມາ"

ນັກເລງສະກາເຫຼົ່ານັ້ນໄດ້ເວົ້າເສີມວ່າ "ຂໍ້ນີ້ເປັນແນວນັ້ນ ຄະຫະບໍດີ ຂໍ້ນີ້ເປັນ ແນວນັ້ນ ຄະຫະບໍດີ ຍ້ອນຄວາມຍິນດີແລະໂສມະນັດ ຍ່ອມເກີດຈາກສິ່ງອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກ"

ຂະນະນັ້ນ ຄະຫະບໍດີນັ້ນຄິດວ່າ "ຄວາມເຫັນຂອງເຮົາກົງກັນກັບພວກນັກເລງສະກາ" ແລ້ວຈາກໄປ ຕໍ່ມາ ເລື້ອງທີ່ເວົ້າກັນນີ້ ໄດ້ແຜ່ເຂົ້າໄປເຖິງພະຣາດຊະວັງໂດຍລຳດັບ

## ທຸກຍ່ອມເກີດຈາກຂອງອັນເປັນທີ່ຮັກ

[໓໕໕] ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນ ໄດ້ຮັບສັ່ງຮຽກພຣະນາງມັນລິກາເທວີມາ ຕັດວ່າ "ມັນລິກາ ຄຳວ່າ "ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ເກີດຈາກສິ່ງອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກ" ພຣະສະມະນະໂຄດົມຂອງທ່ານຕັດໄວ້ບໍ?"

ພຣະນາງມັນລິກາເທວີຂາບທູນວ່າ "ຂ້າແດ່ ມະຫາຣາດ ຖ້າພຣະດຳຣັດນັ້ນພຣະຜູ້ມີພຣະພາກເຈົ້າ ຕັດໄວ້ຈິງ ພຣະດຳຣັດນັ້ນກໍເປັນແນວນັ້ນ ຂ້ານ້ອຍ"

ພຣະເຈົ້າປະເສນທິໂກສົນຕັດວ່າ "ພຣະນາງມັນລິການີ້ຄວນຕາມພຣະດຳຣັດທີ່ພຣະສະມະນະໂຄດົມຕັດທີ່ນັ້ນວ່າ "ຂ້າແດ່ ມະຫາຣາດ ຖ້າພຣະດຳຣັດນັ້ນພຣະຜູ້ມີພຣະພາກເຈົ້າຕັດໄວ້ຈິງ ພຣະດຳຣັດນັ້ນກໍເປັນແນວນັ້ນ" ສິດຄວນຕາມຄຳທີ່ອາຈານກ່າວວ່າ "ຂໍ້ນີ້ເປັນ ແນວນັ້ນ

ທ່ານອາຈານ ຂໍ້ນີ້ເປັນແນວນັ້ນ ທ່ານອາຈານ" ສັນໃດ ທ່ານກໍສັນນັ້ນ ຄືກັນ ຄວນຕາມພຣະດຳຣັດທີ່ພຣະສະມະນະໂຄດົມຕັດທໍ່ນັ້ນວ່າ "ຂ້າແດ່ ມະຫາຣາດ ຖ້າພຣະດຳຣັດນັ້ນພຣະຜູ້ມີພຣະພາກເຈົ້າຕັດໄວ້ຈິງ ພຣະດຳຣັດນັ້ນກໍເປັນແນວນັ້ນ" ມັນລິກາ ເຈົ້າຈົ່ງຫລົບໜ້າໄປໃຫ້ພົ້ນ ຈົ່ງພິນາດສາ"

ລຳດັບນັ້ນ ພຣະນາງມັນລິກາເທວີຮັບສັ່ງຮຽກພາມຊື່ນາລິຊັງຄະມາຕັດວ່າ "ມາເທີ້ນທ່ານພາມ ທ່ານຈົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ພຣະບາດທັງສອງຂອງພຣະອົງດ້ວຍຂະໜ່ອມ ແລ້ວທູນຖາມເຖິງພຣະສຸກພາບ ຄວາມມີພຣະໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ ຕາມຄຳຂອງຂ້ອຍວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພຣະນາງມັນລິກາເທວີຂໍຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ທູນຖາມເຖິງພຣະສຸກພາບ ຄວາມມີພຣະໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ" ແລະທ່ານຈົ່ງທູນຖາມແນວນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພຣະດຳຣັດນີ້ວ່າ "ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ເກີດຈາກສິ່ງອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກ" ພຣະຜູ້ມີພຣະພາກເຈົ້າຕັດຈິງບໍ" ທ່ານຄວນຈືພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໃຫ້ດີແລ້ວມາບອກສັນ ທຳມະດາພຣະຕະຖາຄົດທັງຫລາຍ ຍ່ອມຕັດບໍ່ຜິດພາດແນ່"

ນາລິຊັງຄພາມຮັບພຣະຣາຊະເສົາວະນີແລ້ວໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພຣະນາງມັນລິກາເທວີຂໍຖວາຍອະພິວາດພຣະບາດທັງສອງຂອງທ່ານພຣະໂຄດົມດ້ວຍຂະໜ່ອມ ທູນຖາມເຖິງພຣະສຸກພາບ ຄວາມມີພຣະໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ ແລ້ວຮັບສັ່ງທູນຖາມແນວນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພຣະດຳຣັດນີ້ວ່າ "ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ເກີດຈາກສິ່ງອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກ" ພຣະຜູ້ມີພຣະພາກເຈົ້າຕັດໄວ້ແທ້ບໍ?"

[໓໕໖] ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ຂໍ້ນີ້ເປັນແນວນັ້ນ ພາມ ຂໍ້ນີ້ ເປັນແນວນັ້ນພາມ ຍ້ອນວ່າໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ເກີດຈາກສິ່ງອັນເປັນທີ່ຮັກມີມາຈາກສິ່ງອັນເປັນທີ່ຮັກ ການທີ່ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ເກີດຈາກສິ່ງອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກໄດ້ແນວໃດ ທ່ານເພິ່ງຮູ້ໂດຍອະທິບາຍນີ້

ເລື້ອງເຄີຍມີມາແລ້ວ ໃນນະຄອນສາວັດຖີນີ້ແລ ມານດາຂອງຍິງຄົນໜຶ່ງໄດ້ຕາຍໄປຍ້ອນຄວາມຕາຍຂອງມານດານັ້ນ ຍິງນັ້ນຈຶ່ງເປັນບ້າ ມີຈິດເລື່ອນລອຍ ເຂົ້າສູ່ຖະໜົນທຸກາຖະໜົນ

ເຂົ້າສູ່ຮ່ອມທຸກຮ່ອມແລ້ວໄດ້ກ່າວແນວນີ້ວ່າ "ພວກທ່ານໄດ້ພົບມານດາຂອງຂ້ອຍແດ່ບໍ ພວກທ່ານໄດ້ພົບມານດາຂອງຂ້ອຍແດ່ບໍ?"

ການທີ່ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ເກີດຈາກສິ່ງອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກໄດ້ແນວໃດ ທ່ານເພິ່ງຮູ້ໂດຍອະທິບາຍນີ້

ເລື້ອງເຄີຍມີມາແລ້ວ ໃນນະຄອນສາວັດຖີນີ້ແລ ບິດາຂອງຍິງຄົນໜຶ່ງໄດ້ຕາຍໄປ ຯລຯ ອ້າຍນ້ອງຊາຍ ຯລຯ ເອື້ອຍນ້ອງສາວ ຯລຯ ບຸດ ຯລຯ ທິດາ ຯລຯ ສາມີຂອງຍິງຄົນໜຶ່ງໄດ້ຕາຍໄປ ຍ້ອນຄວາມຕາຍຂອງສາມີນັ້ນ ຍິງນັ້ນຈຶ່ງເປັນບ້າ ມີຈິດເລື່ອນລອຍ ເຂົ້າສູ່ຖະໜົນທຸກຖະໜົນ ເຂົ້າສູ່ຮ່ອມທຸກຮ່ອມແລ້ວກ່າວແນວນີ້ວ່າ "ພວກທ່ານໄດ້ພົບສາມີຂອງຂ້ອຍແດ່ບໍ ພວກທ່ານ ໄດ້ພົບສາມີຂອງຂ້ອຍແດ່ບໍ?"

ການທີ່ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ເກີດຈາກສິ່ງອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກໄດ້ແນວໃດ ທ່ານເພິ່ງຮູ້ໂດຍອະທິບາຍນີ້

ເລື້ອງເຄີຍມີມາແລ້ວ ໃນນະຄອນສາວັດຖີນີ້ແລ ມານດາຂອງຊາຍຄົນໜຶ່ງຕາຍໄປ ຍ້ອນຄວາມຕາຍຂອງມານດານັ້ນ ຊາຍຄົນນັ້ນຈຶ່ງເປັນບ້າ ມີຈິດເລື່ອນລອຍ ເຂົ້າສູ່ຖະໜົນທຸກຖະໜົນ ເຂົ້າສູ່ຮ່ອມທຸກຮ່ອມແລ້ວໄດ້ກ່າວແນວນີ້ວ່າ "ພວກທ່ານໄດ້ພົບມານດາຂອງຂ້າພະເຈົ້າແດ່ບໍ? ພວກທ່ານໄດ້ພົບມານດາຂອງຂ້າພະເຈົ້າແດ່ບໍ?"

ການທີ່ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ເກີດຈາກສິ່ງອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກໄດ້ແນວໃດ ທ່ານເພິ່ງຮູ້ໂດຍອະທິບາຍນີ້

ເລື້ອງເຄີຍມີມາແລ້ວ ໃນນະຄອນສາວັດຖີນີ້ແລ ບິດາຂອງຊາຍຄົນໜຶ່ງຕາຍໄປ ຯລຯ ອ້າຍນ້ອງຊາຍ ຯລຯ ເອື້ອຍນ້ອງສາວ ຯລຯ ບຸດ ຯລຯ ທິດາ ຯລຯ ພັນລະຍາຂອງຊາຍຄົນໜຶ່ງຕາຍໄປ ຍ້ອນຄວາມຕາຍຂອງພັນລະຍານັ້ນ ຊາຍຄົນນັ້ນຈຶ່ງເປັນບ້າ ມີຈິດເລື່ອນລອຍ ເຂົ້າສູ່ຖະໜົນທຸກຖະໜົນ ເຂົ້າສູ່ຮ່ອມທຸກຮ່ອມ ແລ້ວໄດ້ກ່າວແນວນີ້ວ່າ "ພວກທ່ານໄດ້ພົບພັນລະຍາຂອງຂ້າພະເຈົ້າແດ່ບໍ? ພວກທ່ານໄດ້ພົບພັນລະຍາຂອງຂ້າພະເຈົ້າແດ່ບໍ?"

ການທີ່ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ເກີດຈາກສິ່ງອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກໄດ້ແນວໃດ ທ່ານເພິ່ງຮູ້ໂດຍອະທິບາຍນີ້

ພາມ ເລື້ອງເຄີຍມີມາແລ້ວ ໃນນະຄອນສາວັດຖີນີ້ແລ ຍິງຄົນໜຶ່ງໄດ້ໄປສູ່ຕະກູນຂອງຍາດ ພວກຍາດຂອງຍິງນັ້ນ ຕ້ອງການຈະພາກສາມີຂອງນາງແລ້ວຍົກນາງໃຫ້ແກ່ຊາຍອື່ນ ແຕ່ຍິງນັ້ນບໍ່ປາຖະໜາຊາຍຄົນນັ້ນ ຕໍ່ມາຍິງນັ້ນໄດ້ບອກສາມີວ່າ "ພີ່ ພວກຍາດຂອງເຮົາຕ້ອງການ

ຈະພາກທ່ານແລ້ວຍົກເຮົາໃຫ້ແກ່ຊາຍອື່ນ ແຕ່ເຮົາບໍ່ປາຖະໜາຊາຍຄົນນັ້ນ" ຕໍ່ຈາກນັ້ນ ສາມີໄດ້ຟັນພັນລະຍາຂາດສອງທ່ອນແລ້ວຈຶ່ງຂ້າໂຕຕາຍຕາມ ດ້ວຍຄິດວ່າ "ເຮົາທັງສອງຈະບໍ່ພາກຈາກກັນ"

ການທີ່ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ເກີດຈາກສິ່ງອັນເປັນທີ່ຮັກມີມາຈາກສິ່ງອັນເປັນທີ່ຮັກໄດ້ແນວໃດ ທ່ານເພິ່ງຮູ້ໂດຍອະທິບາຍນີ້ເທີ້ນ"

[໓໕໗] ຄັ້ງນັ້ນ ນາລິຊັງຄພາມຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ແລ້ວລຸກຈາກບ່ອນນັ່ງໄດ້ເຂົ້າໄປເຝົ້າພຣະນາງມັນລິກາເທວີຮອດບ່ອນຢູ່ ໄດ້ຂາບທູນເຖິງເລື້ອງການສົນທະນາປາໄສກັບພຣະຜູ້ມີພຣະພາກເຈົ້າທັງໝົດແກ່ພຣະນາງມັນລິກາເທວີ ລຳດັບນັ້ນ ພຣະນາງ ມັນລິກາເທວີໄດ້ເຂົ້າໄປເຝົ້າພຣະເຈົ້າປະເສນທິໂກສົນຮອດບ່ອນຢູ່ແລ້ວ ໄດ້ທູນຖາມພຣະເຈົ້າ ປະເສນທິໂກສົນ ວ່າ

"ຂ້າແດ່ ມະຫາຣາດ ທູນຂະໜ່ອມເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ພຣະກຸມາຣີພຣະນາມວ່າວຊີຣີ ເປັນທີ່ຮັກຂອງທູນຂະໜ່ອມແມ່ນບໍ? ຂ້ານ້ອຍ"

ພຣະເຈົ້າປະເສນທິໂກສົນຕັດຕອບວ່າ "ແມ່ນແລ້ວ ມັນລິກາ ວະຊີຣະກຸມາຣີເປັນທີ່ຮັກຂອງເຮົາ"

"ທູນຂະໜ່ອມເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ຍ້ອນວະຊີຣະກຸມາຣີຕ້ອງມີອັນຜັນແປເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ຈະເພິ່ງເກີດຂຶ້ນແກ່ທູນຂະໜ່ອມບໍ ຂ້ານ້ອຍ"

"ມັນລິກາ ຍ້ອນວະຊີຣະກຸມາຣີຜັນແປເປັນແນວອື່ນໄປ ແມ່ນຊີວິດຂອງເຮົາກໍຕ້ອງຜັນແປເປັນແນວອື່ນໄປດ້ວຍ ເປັນຫຍັງ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈັກບໍ່ເກີດຂຶ້ນແກ່ເຮົານໍ?"

"ຂໍ້ນີ້ແລ ທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຊົງມຸ້ງໝາຍ ຈຶ່ງຕັດວ່າ "ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ເກີດຈາກສິ່ງ ອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກ" ຂ້ານ້ອຍ

ທູນຂະໜ່ອມເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ພຣະນາງວາສະພະຂັດຕະຍາເປັນທີ່ຮັກຂອງທູນຂະໜ່ອມແມ່ນບໍຂ້ານ້ອຍ"

"ແມ່ນແລ້ວ ມັນລິກາ ພຣະນາງວາສະພະຂັດຕະຍາເປັນທີ່ຮັກຂອງເຮົາ"

"ທູນຂະໜ່ອມຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ຍ້ອນພຣະນາງວາສະພະຂັດຕະຍາຜັນແປເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈະເພິ່ງເກີດຂຶ້ນແກ່ທູນຂະໜ່ອມບໍ? ຂ້ານ້ອຍ"

"ມັນລິກາ ຍ້ອນພຣະນາງວາສະພະຂັດຕະຍາຜັນແປເປັນແນວອື່ນໄປ ແມ່ນຊີວິດຂອງເຮົາ ກໍຕ້ອງຜັນແປເປັນແນວອື່ນໄປດ້ວຍ ແລ້ວເປັນຫຍັງ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ຈັກບໍ່ເກີດຂຶ້ນແກ່ເຮົານໍ?"

"ຂໍ້ນີ້ແລ ທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສໍາມາສໍາພຸດທະເຈົ້າ ຊົງມຸ້ງໝາຍ ຈຶ່ງຕັດວ່າ "ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ເກີດຈາກສິ່ງອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກ" ຂ້ານ້ອຍ

ທູນຂະໜ່ອມ ຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ເສນາບໍດີຊື່ວິທູທະພະເປັນທີ່ຮັກຂອງທູນຂະໜ່ອມແມ່ນບໍຂ້ານ້ອຍ"

"ແມ່ນແລ້ວ ມັນລິກາ ເສນາບໍດີຊື່ວິທູທະພະເປັນທີ່ຮັກຂອງເຮົາ"

"ທູນຂະໜ່ອມຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ຍ້ອນເສນາບໍດີຊື່ວິທູທະພະຜັນແປເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈະເພິ່ງເກີດຂຶ້ນແກ່ທູນຂະໜ່ອມບໍ? ຂ້ານ້ອຍ"

"ມັນລິກາ ຍ້ອນເສນາບໍດີຊື່ວິທູທະພະ ຜັນແປເປັນແນວອື່ນໄປ ແມ່ນຊີວິດຂອງເຮົາ ກໍຕ້ອງຜັນແປເປັນແນວອື່ນໄປດ້ວຍ ແລ້ວເປັນຫຍັງ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ຈັກບໍ່ເກີດຂຶ້ນແກ່ເຮົານໍ?"

"ຂໍ້ນີ້ແລ ທີ່ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສໍາມາສໍາພຸດທະເຈົ້າ ຊົງມຸ້ງໝາຍ ຈຶ່ງຕັດວ່າ "ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ເກີດຈາກສິ່ງ ອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກ" ຂ້ານ້ອຍ

ທູນຂະໜ່ອມຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ຂ້ານ້ອຍເປັນທີ່ຮັກຂອງທູນຂະໜ່ອມແມ່ນບໍ ຂ້ານ້ອຍ"

"ແມ່ນແລ້ວ ມັນລິກາ ທ່ານເປັນທີ່ຮັກຂອງເຮົາ"

"ທູນຂະໜ່ອມຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ຍ້ອນຂ້ານ້ອຍຜັນແປເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ຈະເພິ່ງເກີດຂຶ້ນແກ່ທູນຂະໜ່ອມບໍ? ຂ້ານ້ອຍ"

"ມັນລິກາ ຍ້ອນທ່ານຜັນແປເປັນແນວອື່ນໄປ ແມ່ນຊີວິດຂອງເຮົາກໍຕ້ອງຜັນແປເປັນແນວອື່ນໄປດ້ວຍ ເປັນຫຍັງ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈັກບໍ່ເກີດຂຶ້ນ ແກ່ເຮົານໍ?"

"ຂໍ້ນີ້ແລ ທີ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຊົງມຸ້ງໝາຍ ຈຶ່ງຕັດວ່າ "ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ເກີດຈາກສິ່ງ ອັນເປັນທີ່ຮັກ ມີມາຈາກສິ່ງອັນເປັນທີ່ຮັກ" ຂ້ານ້ອຍ

ທູນຂະໝ່ອມຊົງເຂົ້າພຣະຫະໄທຄວາມຂໍ້ນັ້ນວ່າແນວໃດ ແຄວ້ນກາສີ ແລະ ແຄວ້ນໂກສົນເປັນທີ່ຮັກຂອງທູນຂະໝ່ອມແມ່ນບໍ ຂ້ານ້ອຍ"

"ແມ່ນແລ້ວ ມັນລິກາ ແຄວ້ນກາສີແລະແຄວ້ນໂກສົນເປັນທີ່ຮັກຂອງເຮົາ ຍ້ອນອານຸພາບແຫ່ງແຄວ້ນກາສີແລະແຄວ້ນໂກສົນ ເຮົາຈຶ່ງໃຊ້ສອຍແກ່ນຈັນທີ່ເກີດຈາກແຄວ້ນກາສີ ໄດ້ທັດຊົງດອກໄມ້ ຂອງຫອມ ແລະ ເຄື່ອງລູບໄລ້"

"ທູນຂະໝ່ອມຊົງເຂົ້າພຣະຫະໄທຄວາມຂໍ້ນັ້ນວ່າແນວໃດ ຍ້ອນແຄວ້ນກາສີແລະແຄວ້ນໂກສົນຜັນແປເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ຈະເພິ່ງເກີດຂຶ້ນແກ່ທູນຂະໝ່ອມບໍ ຂ້ານ້ອຍ"

"ມັນລິກາ ຍ້ອນແຄວ້ນກາສີ ແລະ ແຄວ້ນໂກສົນຜັນແປເປັນແນວອື່ນໄປ ແມ່ນຊີວິດຂອງເຮົາກໍຕ້ອງຜັນແປເປັນແນວອື່ນໄປດ້ວຍ ແລເວເປັນຫຍັງ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈັກບໍ່ເກີດຂຶ້ນແກ່ເຮົານໍ?"

ພຣະນາງມັນລິກາເທວີຂາບທູນວ່າ "ຂ້າແດ່ ມະຫາຣາດ ຂໍ້ນີ້ແລ ທີ່ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຊົງມຸ້ງໝາຍ ຈຶ່ງຕັດວ່າ "ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ເກີດຈາກສິ່ງອັນເປັນທີ່ຮັກ ມີມາຈາກສິ່ງ ອັນເປັນທີ່ຮັກ ຂ້ານ້ອຍ"

ພຣະເຈົ້າປະເສນທິໂກສົນຕັດວ່າ "ມັນລິກາ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຈະຊົງເຫັນແຈ້ງ ແທງຕະຫຼອດດ້ວຍພຣະປັນຍາແລ້ວ ມາເທີ້ນ ມັນລິກາຊ່ອຍລ້າງມືໃຫ້ແດ່ເທີ້ນ"

ຈາກນັ້ນ ພຣະເຈົ້າປະເສນທິໂກສົນຊົງລຸກຂຶ້ນຈາກທີ່ປະທັບ ຊົງຫົ່ມພຣະພູສາບ່ຽງບ່າປະນົມພຣະຫັດໄປທາງທິດທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ແລ້ວ ຊົງເປັ່ງອຸທານ ໓ ຄັ້ງວ່າ

"ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະອົງນັ້ນ

ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະອົງນັ້ນ

ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະອົງນັ້ນ" ດັ່ງນີ້ແລ

**ປິຍະຊາຕິກະສູດທີ່ ໗ ຈົບ**

# ໘. ພາຫິຕິກະສູດ

## ວ່າດ້ວຍການຖວາຍຜ້າພາຫິຕິກາ

## ພຣະເຈົ້າປະເສນທິໂກສົນຊົງສົນທະນາທໍາກັບພຣະອານົນ

[໓໔໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ເມື່ອເວລາເຊົ້າ ທ່ານພຣະອານົນຄອງອັນຕະຣະວາສົກຖືບາດ ແລະຈີວອນເຂົ້າໄປບິນທະບາດໃນກຣຸງສາວັດຖີ ທ່ຽວບິນທະບາດໃນນະຄອນສາວັດຖີແລ້ວ ກັບຈາກບິນທະບາດພາຍຫລັງສັນພັດຕາຫານສໍາເລັດແລ້ວ ໄດ້ເຂົ້າໄປສູ່ບຸບພາຣາມຜາສາດຂອງນາງວິສາຂາມິຄາຣະມາຕາເພື່ອພັກກາງເວັນ

ສະໄໝນັ້ນ ພຣະເຈົ້າປະເສນທິໂກສົນ ສະເດັດຂຶ້ນຊ້າງເອກບຸນທະຣີກ ອອກຈາກນະຄອນສາວັດຖີແຕ່ຍັງເວັນ ທອດພຣະເນດເຫັນທ່ານພຣະອານົນກໍາລັງຍ່າງມາແຕ່ໄກ ໄດ້ຮັບສັ່ງຮຽກອໍາມາດ ຊື່ສີ ຣິວັດທະມາ ຕັດວ່າ "ສີຣິວັດທະເພື່ອນຮັກ ນັ້ນພຣະຜູ້ເປັນເຈົ້າອານົນແມ່ນບໍ?"

ສີຣິວັດທະມະຫາອໍາມາດຂາບທູນວ່າ "ແມ່ນ ໂດຍຂ້ານ້ອຍ ນັ້ນພຣະຜູ້ເປັນເຈົ້າອານົນ"

ລໍາດັບນັ້ນ ພຣະເຈົ້າປະເສນທິໂກສົນຮັບສັ່ງຮຽກຊາຍຄົນໜຶ່ງມາຕັດວ່າ "ມາເທີ້ນ ທ້າວທ່ານຈົ່ງເຂົ້າໄປຫາພຣະຜູ້ເປັນເຈົ້າອານົນຮອດບ່ອນຢູ່ແລ້ວ ຂາບຕີນທັງສອງຂອງພຣະຜູ້ເປັນເຈົ້າອານົນດ້ວຍຂະໜ່ອມ ຕາມຄໍາຂອງເຮົາວ່າ "ພຣະຜູ້ເປັນເຈົ້າ ພຣະເຈົ້າປະເສນທິໂກສົນ ຊົງຂາບຕີນທັງສອງຂອງພຣະຜູ້ເປັນເຈົ້າອານົນດ້ວຍຂະໜ່ອມ" ແລະ ຈົ່ງຮຽນທ່ານ ແນວນີ້ວ່າ "ພຣະຜູ້

ເປັນເຈົ້າ ໄດ້ຂ່າວວ່າ ຖ້າພຣະຜູ້ເປັນເຈົ້າອານົນບໍ່ມີກິດຮີບຮ້ອນອັນໃດ ຂໍພຣະຜູ້ເປັນເຈົ້າອານົນຈົ່ງອາໄສຄວາມອະນຸເຄາະຖ້າຢູ່ຈັກນ້ອຍໜຶ່ງເທີ້ນ"

ຊາຍຄົນນັ້ນ ທູນຮັບສະໜອງພຣະຣາຊະດຳຣັດແລ້ວ ຈຶ່ງເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ຂາບທ່ານພຣະອານົນແລ້ວໄດ້ຢືນຢູ່ທີ່ທີ່ສົມຄວນ ໄດ້ຂາບຮຽນທ່ານພຣະອານົນວ່າ

"ພຣະຜູ້ເປັນເຈົ້າ ພຣະເຈົ້າປະເສນທິໂກສົນຊົງຂາບຕີນທັງສອງຂອງພຣະຜູ້ເປັນເຈົ້າອານົນດ້ວຍພຣະສຽນເກລົ້າ ແລະຮັບສັ່ງມາແນວນີ້ວ່າ "ໄດ້ຂ່າວວ່າ ຖ້າພຣະຜູ້ເປັນເຈົ້າອານົນບໍ່ມີກິດຮີບຮ້ອນອັນໃດ ຂໍພຣະຜູ້ເປັນເຈົ້າອານົນຈົ່ງອາໄສຄວາມອະນຸເຄາະຖ້າຢູ່ຈັກນ້ອຍໜຶ່ງເທີ້ນ"

ທ່ານພຣະອານົນຮັບນິມົນໂດຍດຸດສະນີພາບ ລຳດັບນັ້ນ ພຣະເຈົ້າປະເສນທິໂກສົນ ສະເດັດໄປຈົນສຸດທາງທີ່ຊ້າງຊົງຈະໄປໄດ້ແລ້ວລົງຈາກຊ້າງຊົງ ສະເດັດພຣະຣາດຊະດຳເນີນໄປດ້ວຍພຣະບາດ ເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ຊົງຂາບແລ້ວປະທັບຢືນຢູ່ບ່ອນທີ່ດົມຄວນ ໄດ້ຕັດກັບທ່ານພຣະອານົນວ່າ "ພຣະຜູ້ເປັນເຈົ້າ ຖ້າພຣະຜູ້ເປັນເຈົ້າອານົນບໍ່ມີກິດຮີບຮ້ອນອັນໃດ ຂໍໂອກາດເທີ້ນ ຂໍພຣະຜູ້ເປັນເຈົ້າອານົນຈົ່ງອາໄສຄວາມອະນຸເຄາະໄປສູ່ຝັ່ງແມ່ນ້ຳ ອະຈິຣະວະດີເທີ້ນ"

ທ່ານພຣະອານົນຮັບນິມົນໂດຍດຸດສະນີພາບ

## ສະມາຈານ ໓

[໓໕໙] ຄັ້ງນັ້ນ ທ່ານພຣະອານົນໄດ້ເຂົ້າໄປສູ່ຝັ່ງແມ່ນ້ຳອະຈິຣະວະດີແລ້ວນັ່ງເທິງ ອາສະນະທີ່ປູລາດໄວ້ແລ້ວທີ່ເຫງົ້າຕົ້ນໄມ້ແຫ່ງໜຶ່ງ ລຳດັບນັ້ນ ພຣະເຈົ້າປະເສນທິໂກສົນສະເດັດໄປຈົນສຸດທາງທີ່ຊ້າງຊົງຈະໄປໄດ້ແລ້ວລົງຈາກຊ້າງຊົງ ສະເດັດພຣະຣາດຊະດຳເນີນໄປດ້ວຍພຣະບາດ ເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ຊົງຂາບແລ້ວປະທັບຢືນຢູ່ທີ່ທີ່ສົມຄວນ ໄດ້ຕັດ ກັບທ່ານພຣະອານົນວ່າ "ພຣະຜູ້ເປັນເຈົ້າ ຂໍພຣະຜູ້ເປັນເຈົ້າອານົນຈົ່ງນັ່ງເທິງເຄື່ອງປູລາດໄມ້ ນີ້ເທີ້ນ"

ທ່ານພຣະອານົນທູລວ່າ "ຢ່າເລີຍ ມະຫາບໍພິດ ເຊີນພຣະອົງປະທັບນັ່ງເທີ້ນ ອາດຕະມາພາບນັ່ງເທິງອາສະນະຂອງອາດຕະມາພາບຢູ່ແລ້ວ"

ພຣະເຈົ້າປະເສນທິໂກສົນຈຶ່ງປະທັບນັ່ງເທິງທີ່ປະທັບທີ່ປູລາດໄວ້ແລ້ວ ໄດ້ຕັດຖາມທ່ານພຣະອານົນວ່າ "ພຣະຜູ້ເປັນເຈົ້າອານົນ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງປະພຶດ ກາຍສະມາຈານ (ຄວາມປະພຶດທາງກາຍ) ທີ່ສະມະນະພາມທັງຫລາຍຜູ້ຮູ້ແຈ້ງ ເພິ່ງຕິຕຽນແດ່ຫຼືບໍ່?"

ທ່ານພຣະອານົນຖວາຍພຣະພອນວ່າ "ມະຫາບໍພິດ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

ບໍ່ຊົງປະພຶດກາຍສະມາຈານທີ່ສະມະນະພາມທັງຫລາຍ ຜູ້ຮູ້ແຈ້ງເພິ່ງຕິຕຽນ ຂໍຖວາຍພຣະພອນ"

ພຣະເຈົ້າປະເສນທິໂກສົນຕັດຖາມວ່າ "ພຣະຜູ້ເປັນເຈົ້າ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງປະພຶດວະຈີສະມາຈານ (ຄວາມປະພຶດທາງວາຈາ) ໆລໆ ມະໂນສະມາຈານ (ຄວາມປະພຶດທາງໃຈ) ທີ່ສະມະນະພາມທັງຫລາຍຜູ້ຮູ້ແຈ້ງ ເພິ່ງຕິຕຽນແດ່ຫຼືບໍ?"

ທ່ານພຣະອານົນຖວາຍພຣະພອນວ່າ "ມະຫາບໍພິດ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນບໍ່ຊົງປະພຶດມະໂນສະມາຈານທີ່ສະມະນະພາມທັງຫລາຍ ຜູ້ຮູ້ແຈ້ງເພິ່ງຕິຕຽນ ຂໍຖວາຍພຣະພອນ"

ພຣະເຈົ້າປະເສນທິໂກສົນຕັດວ່າ "ພຣະຜູ້ເປັນເຈົ້າ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດຂໍ້ຄວາມທີ່ພວກຂ້ານ້ອຍບໍ່ສາມາດເຮັດໃຫ້ບໍລິບູນດ້ວຍການຕັ້ງບັນຫາ ພຣະຜູ້ເປັນເຈົ້າອານົນເຮັດໃຫ້ບໍລິບູນໄດ້ດ້ວຍການແກ້ບັນຫາ ຊົນເຫຼົ່າໃດເປັນຄົນພານ ບໍ່ສະຫຼາດ ບໍ່ພິຈາຣະນາ ບໍ່ພິຈາລະນາແລ້ວຍັງກ່າວຄຸນ ຫຼື ໂທດຂອງຊົນເຫຼົ່າອື່ນໄດ້ ພວກຂ້ານ້ອຍບໍ່ຍຶດຖືການກ່າວຄຸນຫຼືໂທດຂອງຊົນເຫຼົ່ານັ້ນ ໂດຍຄວາມເປັນສາລະ

ພຣະຜູ້ເປັນເຈົ້າ ສ່ວນຊົນເຫຼົ່າໃດເປັນບັນດິດ ເປັນຜູ້ສະຫຼາດແຫຼມຄົມ ມີປັນຍາ ພິຈາຣະນາພິຈາລະນາແລ້ວ ກ່າວຄຸນຫຼືໂທດຂອງຊົນເຫຼົ່າອື່ນ ພວກຂ້ານ້ອຍຍ່ອມຍຶດຖືການກ່າວຄຸນຫຼືໂທດຂອງຊົນເຫຼົ່ານັ້ນໂດຍຄວາມເປັນສາລະ

[໓໗໐] ກາຍສະມາຈານທີ່ສະມະນະພາມຜູ້ຮູ້ແຈ້ງ ເພິ່ງຕິຕຽນ ເປັນແນວໃດ?"

ທ່ານພຣະອານົນຖວາຍພຣະພອນວ່າ "ມະຫາບໍພິດ ກາຍສະມາຈານທີ່ເປັນອະກຸສົນເປັນກາຍສະມາຈານທີ່ສະມະນະພາມທັງຫລາຍຜູ້ຮູ້ແຈ້ງ ເພິ່ງຕິຕຽນ ຂໍຖວາຍພຣະພອນ"

"ພຣະຜູ້ເປັນເຈົ້າ ກາຍສະມາຈານທີ່ເປັນອະກຸສົນ ເປັນແນວໃດ?"

"ກາຍສະມາຈານທີ່ມີໂທດ ເປັນກາຍສະມາຈານທີ່ເປັນອະກຸສົນ ຂໍຖວາຍພຣະພອນ"

"ພຣະຜູ້ເປັນເຈົ້າ ກາຍສະມາຈານທີ່ມີໂທດ ເປັນແນວໃດ?"

"ກາຍສະມາຈານທີ່ມີຄວາມບຽດບຽນ ເປັນກາຍສະມາຈານທີ່ມີໂທດ ຂໍຖວາຍພຣະພອນ"

"ພຣະຜູ້ເປັນເຈົ້າ ກາຍສະມາຈານທີ່ມີຄວາມບຽດບຽນ ເປັນແນວໃດ?"

"ກາຍສະມາຈານທີ່ມີທຸກເປັນວິບາກ ເປັນກາຍສະມາຈານທີ່ມີຄວາມບຽດບຽນ ຂໍຖວາຍພຣະພົນ"

"ພຣະຜູ້ເປັນເຈົ້າ ກາຍສະມາຈານທີ່ມີທຸກເປັນວິບາກ ເປັນແນວໃດ?"

"ກາຍສະມາຈານໃດ ຍ່ອມເປັນໄປເພື່ອບຽດບຽນຕົນເອງແດ່ ເພື່ອບຽດບຽນຜູ້ອື່ນແດ່ ເພື່ອບຽດບຽນທັງ ໒ ຝ່າຍແດ່ ອະກຸສົນທຳທັງຫລາຍຍ່ອມຈະເລີນແກ່ກາຍສະມາຈານນັ້ນ ກຸສົນທຳທັງຫລາຍຍ່ອມເສື່ອມ (ຈາກກາຍສະມາຈານນັ້ນ) ກາຍສະມາຈານເຫັນຢູ່ແນວນັ້ນ ສະມະນະພາມທັງຫລາຍຜູ້ຮູ້ແຈ້ງ ເພິ່ງຕິຕຽນ ຂໍຖວາຍພຣະພອນ"

"ພຣະຜູ້ເປັນເຈົ້າ ວະຈີສະມາຈານ ໆລໆ ມະໂນສະມາຈານທີ່ສະມະນະພາມທັງຫລາຍຜູ້ຮູ້ແຈ້ງເພິ່ງຕິຕຽນ ເປັນແນວໃດ?"

"ມະໂນສະມາຈານທີ່ເປັນອະກຸສົນ ເປັນມະໂນສະມາຈານທີ່ສະມະນະພາມທັງຫລາຍຜູ້ຮູ້ແຈ້ງເພິ່ງຕິຕຽນ ຂໍຖວາຍພຣະພອນ"

"ພຣະຜູ້ເປັນເຈົ້າ ມະໂນສະມາຈານທີ່ເປັນອະກຸສົນ ເປັນແນວໃດ?"

"ມະໂນສະມາຈານທີ່ມີໂທດ ເປັນມະໂນສະມາຈານທີ່ເປັນອະກຸສົນ ຂໍຖວາຍພຣະພອນ"

"ພຣະຜູ້ເປັນເຈົ້າ ມະໂນສະມາຈານທີ່ມີໂທດ ເປັນແນວໃດ?"

"ມະໂນສະມາຈານທີ່ມີຄວາມບຽດບຽນ ເປັນມະໂນສະມາຈານທີ່ມີໂທດ ຂໍຖວາຍພຣະພອນ"

"ພຣະຜູ້ເປັນເຈົ້າ ມະໂນສະມາຈານທີ່ມີຄວາມບຽດບຽນ ເປັນແນວໃດ?"

"ມະໂນສະມາຈານທີ່ມີທຸກເປັນວິບາກ ເປັນມະໂນສະມາຈານທີ່ມີຄວາມບຽດບຽນຂໍຖວາຍພຣະພອນ"

"ພຣະຜູ້ເປັນເຈົ້າ ມະໂນສະມາຈານທີ່ມີທຸກເປັນວິບາກ ເປັນແນວໃດ?"

"ມະໂນສະມາຈານໃດຍ່ອມເປັນໄປເພື່ອບຽດບຽນຕົນເອງແດ່ ເພື່ອບຽດບຽນຜູ້ອື່ນແດ່ ເພື່ອບຽດບຽນທັງ ໒ ຝ່າຍແດ່ ອະກຸສົນທຳທັງຫລາຍຍ່ອມຈະເລີນແກ່ມະໂນສະມາຈານນັ້ນ ກຸສົນທຳທັງຫລາຍຍ່ອມເສື່ອມ ມະໂນສະມາຈານເຫັນຢູ່ແນວນັ້ນ ສະມະນະພາມທັງຫລາຍຜູ້ຮູ້ແຈ້ງເພິ່ງຕິຕຽນ ຂໍຖວາຍພຣະພອນ"

ພຣະເຈົ້າປະເສນທິໂກສົນຕັດຖາມວ່າ "ພຣະຜູ້ເປັນເຈົ້າ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງສັນເສີນການລະອະກຸສົນທຳທຸກແນວບໍ?"

ທ່ານພຣະອານົນຖວາຍພຣະພອນວ່າ "ມະຫາບໍພິດ ພຣະຕະຖາຄົດຊົງລະອະກຸສົນທຳ

ໄດ້ທຸກແນວ ຊຶ່ງປະກອບດ້ວຍກຸສົນທຳ ຂໍຖວາຍພຣະພອນ"

[៣៧១] ພຣະເຈົ້າປະເສນທິໂກສົນຕັດຖາມວ່າ "ພຣະຜູ້ເປັນເຈົ້າ ກາຍສະມາຈານທີ່ສະມະນະພາມທັງຫລາຍຜູ້ຮູ້ແຈ້ງ ບໍ່ເພິ່ງຕິຕຽນ ເປັນແນວໃດ?"

ທ່ານພຣະອານົນຖວາຍພຣະພອນວ່າ "ມະຫາບໍພິດ ກາຍສະມາຈານທີ່ເປັນກຸສົນເປັນກາຍສະມາຈານທີ່ສະມະນະພາມທັງຫລາຍຜູ້ຮູ້ແຈ້ງ ບໍ່ເພິ່ງຕິຕຽນ ຂໍຖວາຍພຣະພອນ"

"ພຣະຜູ້ເປັນເຈົ້າ ກາຍສະມາຈານທີ່ເປັນກຸສົນ ເປັນແນວໃດ?"

"ກາຍສະມາຈານທີ່ບໍ່ມີໂທດ ເປັນກາຍສະມາຈານທີ່ເປັນກຸສົນ ຂໍຖວາຍພຣະພອນ"

"ພຣະຜູ້ເປັນເຈົ້າ ກາຍສະມາຈານທີ່ບໍ່ມີໂທດ ເປັນແນວໃດ?"

"ກາຍສະມາຈານທີ່ບໍ່ມີຄວາມບຽດບຽນ ເປັນກາຍສະມາຈານທີ່ບໍ່ມີໂທດຂໍຖວາຍພຣະພົນ"

"ພຣະຜູ້ເປັນເຈົ້າ ກາຍສະມາຈານທີ່ບໍ່ມີຄວາມບຽດບຽນ ເປັນແນວໃດ?"

"ກາຍສະມາຈານທີ່ມີສຸກເປັນວິບາກ ເປັນກາຍສະມາຈານທີ່ບໍ່ມີຄວາມບຽດບຽນ ຂໍຖວາຍພຣະພົນ"

"ພຣະຜູ້ເປັນເຈົ້າ ກາຍສະມາຈານທີ່ມີສຸກເປັນວິບາກ ເປັນແນວໃດ?"

"ກາຍສະມາຈານໃດຍ່ອມເປັນໄປເພື່ອບໍ່ບຽດບຽນຕົນເອງແດ່ ເພື່ອບໍ່ບຽດບຽນຜູ້ອື່ນແດ່ ເພື່ອບໍ່ບຽດບຽນທັງ ៤ ຝ່າຍແດ່ ອະກຸສົນທຳທັງຫລາຍຍ່ອມເສື່ອມຈາກ ກາຍສະມາຈານນັ້ນ ກຸສົນທຳທັງຫລາຍຍ່ອມຈະເລີນ (ແກ່ກາຍສະມາຈານນັ້ນ) ກາຍສະມາຈານເຫັນຢູ່ແນວນັ້ນ ສະມະນະພາມທັງຫລາຍຜູ້ຮູ້ແຈ້ງ ບໍ່ເພິ່ງຕິຕຽນ ຂໍຖວາຍພຣະພອນ"

"ພຣະຜູ້ເປັນເຈົ້າ ວະຈີສະມາຈານ ຯລຯ ມະໂນສະມາຈານທີ່ສະມະນະພາມທັງຫລາຍຜູ້ຮູ້ແຈ້ງບໍ່ເພິ່ງຕິຕຽນ ເປັນແນວໃດ?"

"ມະໂນສະມາຈານທີ່ເປັນກຸສົນ ເປັນມະໂນສະມາຈານທີ່ສະມະນະພາມທັງຫລາຍຜູ້ຮູ້ແຈ້ງ ບໍ່ເພິ່ງຕິຕຽນ ຂໍຖວາຍພຣະພອນ"

"ພຣະຜູ້ເປັນເຈົ້າ ມະໂນສະມາຈານທີ່ເປັນກຸສົນ ເປັນແນວໃດ?"

"ມະໂນສະມາຈານທີ່ບໍ່ມີໂທດ ເປັນມະໂນສະມາຈານທີ່ເປັນກຸສົນ ຂໍຖວາຍພຣະພອນ"

"ພຣະຜູ້ເປັນເຈົ້າ ມະໂນສະມາຈານທີ່ບໍ່ມີໂທດ ເປັນແນວໃດ?"

"ມະໂນສະມາຈານທີ່ບໍ່ມີຄວາມບຽດບຽນ ເປັນມະໂນສະມາຈານທີ່ບໍ່ມີໂທດ ຂໍຖວາຍພຣະພອນ"

"ພຣະຜູ້ເປັນເຈົ້າ ມະໂນສະມາຈານທີ່ບໍ່ມີຄວາມບຽດບຽນ ເປັນແນວໃດ?"

"ມະໂນສະມາຈານທີ່ມີສຸກເປັນວິບາກ ເປັນມະໂນສະມາຈານທີ່ບໍ່ມີຄວາມບຽດບຽນ ຂໍຖວາຍພຣະພອນ"

"ພຣະຜູ້ເປັນເຈົ້າ ມະໂນສະມາຈານທີ່ມີສຸກເປັນວິບາກ ເປັນແນວໃດ?"

"ມະໂນສະມາຈານໃດຍ່ອມເປັນໄປເພື່ອບໍ່ບຽດບຽນຕົນເອງແດ່ ເພື່ອບໍ່ບຽດບຽນຜູ້ອື່ນແດ່ ເພື່ອບໍ່ບຽດບຽນທັງ ໒ ຝ່າຍແດ່ ອະກຸສົນທຳທັງຫລາຍຍ່ອມເສື່ອມຈາກມະໂນສະມາຈານນັ້ນ ກຸສົນທຳທັງຫລາຍຍ່ອມຈະເລີນ ມະໂນສະມາຈານເຫັນຢູ່ແນວນັ້ນ ສະມະນະພາມທັງຫລາຍຜູ້ຮູ້ແຈ້ງ ບໍ່ເພິ່ງຕິຕຽນ ຂໍຖວາຍພຣະພອນ"

ພຣະເຈົ້າປະເສນທິໂກສົນຕັດຖາມວ່າ "ພຣະຜູ້ເປັນເຈົ້າ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງສັນເສີນການເຂົ້າເຖິງກຸສົນທຳທຸກແນວບໍ?"

ທ່ານພຣະອານົນຖວາຍພຣະພອນວ່າ "ມະຫາບໍພິດ ພຣະຕະຖາຄົດຊົງລະອະກຸສົນທຳໄດ້ທຸກແນວ ຊົງປະກອບດ້ວຍກຸສົນທຳ ຂໍຖວາຍພຣະພອນ"

## ພຣະເຈົ້າປະເສນທິໂກສົນຖວາຍຜ້າພາຫິຕິກາ

[໓໔໒] ພຣະເຈົ້າປະເສນທິໂກສົນຕັດວ່າ "ພຣະຜູ້ເປັນເຈົ້າ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະຜູ້ເປັນເຈົ້າອານົນກ່າວພາສິດນີ້ດີຫຼາຍແທ້ ພວກຂ້ານ້ອຍມີໃຈຊົມຊື່ນຍິນດີດ້ວຍພາສິດຂອງພຣະຜູ້ເປັນເຈົ້າອານົນນີ້ ພວກຂ້ານ້ອຍມີໃຈຊົມຊື່ນຍິນດີດ້ວຍພາສິດຂອງພຣະຜູ້ເປັນເຈົ້າອານົນແນວນີ້ ຖ້າຊ້າງແກ້ວສົມຄວນແກ່ພຣະຜູ້ເປັນເຈົ້າອານົນ ແມ່ນຊ້າງແກ້ວພວກຂ້ານ້ອຍກໍສົມຄວນຖວາຍແກ່ພຣະຜູ້ເປັນເຈົ້າອານົນ ຖ້າມ້າແກ້ວສົມຄວນແກ່ພຣະຜູ້ເປັນເຈົ້າອານົນ ແມ່ນມ້າແກ້ວພວກຂ້ານ້ອຍກໍສົມຄວນຖວາຍແກ່ພຣະຜູ້ເປັນເຈົ້າອານົນ ຖ້າບ້ານສ່ວຍສົມຄວນແກ່ພຣະຜູ້ເປັນເຈົ້າອານົນ ແມ່ນບ້ານສ່ວຍພວກຂ້ານ້ອຍກໍສົມຄວນຖວາຍແກ່ພຣະຜູ້ເປັນເຈົ້າອານົນ" ແຕ່ພວກ ຂ້ານ້ອຍຮູ້ຢູ່ວ່າ "ນັ້ນບໍ່ສົມຄວນແກ່ພຣະຜູ້ເປັນເຈົ້າອານົນເລີຍ"

ພຣະຜູ້ເປັນເຈົ້າ ຜ້າພາຫິຕິກາຜືນນີ້ຍາວ ໑໖ ສອກຖ້ວນ ກວ້າງ ໘ ສອກຖ້ວນ ພຣະເຈົ້າແຜ່ນດິນມະຄົດພຣະນາມວ່າ ອະຊາດສັດຕູເວເທຫິບຸດ ຊົງໃສ່ໃນຄັນສັດສົ່ງມາປະທານ ແກ່ຂ້ານ້ອຍ ຂໍພຣະຜູ້ເປັນເຈົ້າອານົນໂຜດອະນຸເຄາະຮັບຜ້າພາຫິຕິກາໄວ້ເທີ້ນ"

ທ່ານພຣະອານົນຖວາຍພຣະພອນວ່າ "ຢ່າເລີຍ ມະຫາບໍພິດ ໄຕຣຈີວອນຂອງອາດຕະມາພາບມີຄົບແລ້ວ ຂໍຖວາຍພຣະພອນ"

ພຣະເຈົ້າປະເສນທິໂກສົນຕັດວ່າ "ພຣະຜູ້ເປັນເຈົ້າ ແມ່ນ້ຳອະຈິຣະວະດີນີ້ ພຣະຜູ້ເປັນເຈົ້າອານົນ ແລະ ພວກຂ້ານ້ອຍເຫັນແລ້ວ ມະຫາເມກຍັງຝົນໃຫ້ຕົກເທິງພູ ພາຍຫລັງແມ່ນ້ຳອະຈິຣະວະດີນີ້ຍ່ອມໄຫຼຍິ່ງລົ້ນຝັ່ງທັງສອງ ສັນໃດ ທ່ານພຣະອານົນກໍສັນນັ້ນຄືກັນ ຈັກເຮັດໄຕຣຈີວອນຂອງຕົນດ້ວຍຜ້າພາຫິຕິການີ້ ແລະ ຈັກແບ່ງໄຕຣຈີວອນເກົ່າກັບເພື່ອນພົມມະຈາຣີທັງຫລາຍ ເມື່ອເປັນແນວນີ້ ທັກສິນາຂອງພວກຂ້ານ້ອຍນີ້ ຄົງຈັກແຜ່ໄປຄືແມ່ນ້ຳຍິ່ງລົ້ນຝັ່ງ ພຣະຜູ້ເປັນເຈົ້າ ຂໍພຣະຜູ້ເປັນເຈົ້າອານົນໂຜດຮັບຜ້າພາຫິຕິກາເທີ້ນ"

ທ່ານພຣະອານົນຮັບຜ້າພາຫິຕິກາແລ້ວ ລຳດັບນັ້ນ ພຣະເຈົ້າປະເສນທິໂກສົນໄດ້ຕັດກັບທ່ານພຣະອານົນວ່າ "ພຣະຜູ້ເປັນເຈົ້າ ຖ້າຈັ່ງຊັ້ນ ບັດນີ້ ພວກຂ້ານ້ອຍຂໍລາກັບ ຍ້ອນມີກິດ ມີໜ້າທີ່ທີ່ຈະຕ້ອງເຮັດອີກຫຼາຍ"

ທ່ານພຣະອານົນຖວາຍພຣະພອນວ່າ "ມະຫາບໍພິດ ຂໍພຣະອົງຈົ່ງຊົງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

ຕໍ່ຈາກນັ້ນ ພຣະເຈົ້າປະເສນທິໂກສົນຊົງຊົມຊື່ນຍິນດີພາສິດຂອງທ່ານພຣະອານົນແລ້ວສະເດັດລຸກຂຶ້ນຈາກທີ່ປະທັບ ຂາບທ່ານພຣະອານົນ ຊົງກະທຳປະທັກຂິນແລ້ວສະເດັດຈາກໄປ

[໓໖໙] ຄັ້ງນັ້ນ ເມື່ອພຣະເຈົ້າປະເສນທິໂກສົນສະເດັດຈາກໄປບໍ່ດົນ ທ່ານພຣະອານົນໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນໄດ້ຂາບທູນ ເຖິງເລື້ອງການສົນທະນາປາໄສກັບພຣະເຈົ້າປະເສນທິໂກສົນທັງໝົດແດ່ພຣະຜູ້ມີພຣະພາກເຈົ້າ ແລະ ໄດ້ຖວາຍຜ້າພາຫິຕິການັ້ນແດ່ພຣະຜູ້ມີພຣະພາກເຈົ້າ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫລາຍມາຕັດວ່າ "ພິກຂຸທັງຫລາຍ ເປັນລາບຂອງພຣະເຈົ້າປະເສນທິໂກສົນ ພຣະເຈົ້າປະເສນທິໂກສົນຊົງໄດ້ດີແລ້ວ ທີ່ພຣະອົງໄດ້ຊົງພົບອານົນ ແລະ ໄດ້ປະທັບນັ່ງໃກ້ອານົນ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນມີໃຈຍິນດີຕ່າງຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ພາຫິຕິກະສູດທີ່ ໗ ຈົບ**

# ๙. ທຳມະເຈຕິຍະສູດ

## ວ່າດ້ວຍທຳມະເຈດີ

[໓໖໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ນິຄົມຂອງພວກເຈົ້າສາກະຍະຊື່ເມດລຸປະ ແຄວ້ນສັກກະ ສະໄໝນັ້ນແລ ພຣະເຈົ້າປະເສນທິໂກສົນສະເດັດໄປນິຄົມຊື່ນະຄອນກະດ້ວຍພຣະ ຣາຊະວຽກງານບາງຢ່າງ ລຳດັບນັ້ນ ພຣະອົງຮັບສັ່ງກັບເສນາບໍດີຊື່ທີຄະກາຣາຍະນະວ່າ "ກາຣາ ຍະນະ ເພື່ອນຮັກ ທ່ານຈົ່ງຈັດຍານພາຫະນະຄັນງາມ ໆ ກຽມໄວ້ ເຮົາຈະໄປເບິ່ງສະຖານທີ່ອັນ ອອນຊອນໃນອຸທະຍານຫລວງ"

ທີຄະກາຣາຍະນະເສນາບໍດີທູນຮັບສະໜອງພຣະຣາຊະດຳຣັດແລ້ວ ໃຫ້ຈັດຍານພາຫະ ນະຄັນງາມ ໆ ຫຼາຍຄັນໄວ້ ແລ້ວຂາບທູນແດ່ພຣະເຈົ້າປະເສນທິໂກສົນວ່າ "ຂໍເດຊະ ຂ້າພຣະ ອົງຈັດຍານພາຫະນະຄັນງາມ ໆ ຫຼາຍຄັນໄວ້ເພື່ອພຣະອົງແລ້ວ ຂໍພຣະອົງຊົງກຳນົດເວລາທີ່ ສົມຄວນໃນບັດນີ້ເທີ້ນ ໂດຍຂ້ານ້ອຍ"

ລຳດັບນັ້ນ ພຣະເຈົ້າປະເສນທິໂກສົນຊົງຂຶ້ນຍານພາຫະນະຄັນງາມສະເດັດອອກຈາກນິ ຄົມຊື່ນະຄອນກະ ພ້ອມກັບຍານພາຫະນະຄັນງາມ ໆ ຕາມສະເດັດ ດ້ວຍຣາຊານຸພາບຢ່າງຍິ່ງ ໃຫຍ່ ສະເດັດໄປສູ່ອຸທະຍານອັນໜ້າອອນຊອນ ຈົນສຸດທາງທີ່ຍານພາຫະນະຈະໄປໄດ້ແລ້ວລົງ ຈາກຍານ ສະເດັດພຣະຣາດຊະດຳເນີນດ້ວຍພຣະບາດເຂົ້າໄປສູ່ອຸທະຍານ ພຣະອົງພຣະຣາດ ຊະດຳເນີນພັກຜ່ອນໄປມາໃນອຸທະຍານ ໄດ້ທອດພຣະເນດເຫັນໝູ່ໄມ້ລ້ວນເປັນຕາອອນຊອນ ຊວນໃຫ້ເກີດຄວາມເພີນໃຈ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາ ຂອງຜູ້ຄົນ ຄວນເປັນສະຖານບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນທີ່ຫຼີບຫຼີກ ເມື່ອເຫັນ ແລ້ວຊົງເກີດພຣະປິຕິຜາຣົບພຣະຜູ້ມີພຣະພາກເຈົ້າ ວ່າ

"ໝູ່ໄມ້ເຫລົ່ານີ້ລ້ວນເປັນຕາອອນຊອນ ຊວນໃຫ້ເກີດຄວາມເພີນໃຈ ມີສຽງໜ້ອຍ ມີສຽງ ອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນສະຖານບ່ອນເຮັດວຽກລັບ ຂອງມະນຸດ ສົມຄວນເປັນທີ່ຫຼີບຫຼີກ ເປັນຄືສະຖານທີ່ທີ່ເຮົາເຄີຍເຂົ້າໄປເຝົ້າພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າມາກ່ອນ"

[໓໖໕] ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນຮັບສັ່ງຮຽກທີຄະກາຣາຍະນະເສນາບໍດີມາຕັດ ວ່າ "ກາຣາຍະນະເພື່ອນຮັກ ໝູ່ໄມ້ເຫລົ່ານີ້ລ້ວນເປັນຕາອອນຊອນ ຊວນໃຫ້ເກີດຄວາມເພີນໃຈ

ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນສະຖານບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນທີ່ຫຼີກຫຼີກ ເປັນຄືສະຖານທີ່ທີ່ເຮົາເຄີຍເຂົ້າໄປເຝົ້າພຣະຜູ້ມີ ພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າມາກ່ອນ

ກາຣາຍະນະເພື່ອນຮັກ ບັດນີ້ ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ປະທັບຢູ່ໃສ?"

ທີຄະກາຣາຍະນະເສນາບໍດີຂາບທູນວ່າ "ບັດນີ້ ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າ ພຣະອົງນັ້ນ ປະທັບຢູ່ທີ່ນິຄົມຂອງພວກເຈົ້າສາກະຍະຊື່ເມດລຸປະ ໂດຍຂ້ານ້ອຍ"

ພຣະເຈົ້າປະເສນທິໂກສົນຕັດຖາມວ່າ "ກາຣາຍະນະເພື່ອນຮັກ ນິຄົມຂອງພວກເຈົ້າສາກະຍະຊື່ເມດລຸປະ ຢູ່ຫ່າງຈາກນິຄົມຊື່ ນະຄອນກະ ທໍ່ໃດ?"

ທີຄະກາຣາຍະນະເສນາບໍດີທູນຕອບວ່າ "ບໍ່ໄກເກີນໄປ ລະຍະທາງປະມານ ໓ ໂຍດ ອາດສະເດັດໄປເຖິງໄດ້ໂດຍໃຊ້ລະຍະເວລາບໍ່ເຖິງມື້ ໂດຍຂ້ານ້ອຍ"

ພຣະເຈົ້າປະເສນທິໂກສົນຕັດວ່າ "ກາຣາຍະນະເພື່ອນຮັກ ຖ້າເຊັ່ນນັ້ນ ທ່ານຈົ່ງຈັດຍານພາຫະນະຄັນງາມ ໆ ຫຼາຍຄັນໄວ້ ເຮົາຈັກໄປເຝົ້າພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າ ພຣະອົງນັ້ນ"

ທີຄະກາຣາຍະນະເສນາບໍດີທູນຮັບສະໜອງພຣະຣາຊະດຳຣັດແລ້ວ ສັ່ງໃຫ້ຈັດຍານພາຫະນະຄັນງາມ ໆ ຫຼາຍຄັນໄວ້ ແລ້ວຂາບທູນພຣະເຈົ້າປະເສນທິໂກສົນວ່າ "ຂໍເດຊະ ຂ້າພຣະອົງຈັດຍານພາຫະນະຄັນງາມ ໆ ຫຼາຍຄັນໄວ້ແລ້ວ ໂດຍຂ້ານ້ອຍ ຂໍພຣະອົງຊົງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

ລຳດັບນັ້ນ ພຣະເຈົ້າປະເສນທິໂກສົນຊົງຂຶ້ນຍານພາຫະນະຄັນງາມ ສະເດັດອອກຈາກນິຄົມຊື່ ນະຄອນກະ ພ້ອມກັບຍານພາຫະນະຄັນງາມ ໆ ຕາມສະເດັດ ເຖິງນິຄົມຂອງພວກເຈົ້າສາກະຍະ ຊື່ເມດລຸປະໂດຍໃຊ້ເວລາບໍ່ເຖິງມື້ ສະເດັດໄປສູ່ອາຣາມຈົນສຸດທາງທີ່ຍານພາຫະນະຈະໄປໄດ້ແລ້ວ ລົງຈາກຍານ ສະເດັດພຣະຣາດຊະດຳເນີນດ້ວຍພຣະບາດເຂົ້າໄປສູ່ອາຣາມ

## ພຣະເຈົ້າປະເສນທິໂກສົນເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ

[໓໔໔] ສະໄໝນັ້ນ ພິກຂຸຫຼາຍຮູບຍ່າງຈົງກົມຢູ່ທີ່ກາງແຈ້ງ ລຳດັບນັ້ນ ພຣະເຈົ້າປະເສນທິໂກສົນສະເດັດເຂົ້າໄປຫາພິກຂຸເຫຼົ່ານັ້ນຮອດບ່ອນຢູ່ ແລ້ວຕັດຖາມວ່າ "ພຣະຜູ້ເປັນເຈົ້າ ຜູ້ຈະເລີນ ບັດນີ້ ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ປະທັບຢູ່ທີ່ຢູ່ໄສນໍ ຂ້ານ້ອຍປະສົງຈະເຝົ້າພຣະອົງ"

ພິກຂຸເຫຼົ່ານັ້ນ ຖວາຍພຣະພອນວ່າ "ຂໍມະຫາບໍພິດ ຈົ່ງງຽບສຽງ ສະເດັດເຂົ້າໄປສູ່ ພຣະວິຫານຫລັງນັ້ນເຊິ່ງມີປະຕູອັດສະນິດດີແລ້ວ ຢ່າຊົງຮີບຮ້ອນ ສະເດັດເຂົ້າໄປສູ່ລະບຽງຊົງອະແຮມ ແລ້ວຊົງເຄາະກອນປະຕູຈັກໜ້ອຍເທີ້ນ ພຣະຜູ້ມີພຣະພາກເຈົ້າຈັກຊົງໄຂປະຕູຮັບຂໍຖວາຍພຣະພອນ"

ລໍາດັບນັ້ນ ພຣະເຈົ້າປະເສນທິໂກສົນຊົງມອບພຣະແສງຂັນ ແລະ ພຣະອຸນນະຫິດແກ່ທີຄະການາຣາຍນເສນາບໍດີໃນບ່ອນນັ້ນ ຫລັງຈາກນັ້ນທີຄະການາຣາຍະນະເສນາບໍດີໄດ້ຄິດວ່າ "ບັດນີ້ພຣະມະຫາຣາດຈັກ ຊົງປຶກສາຄວາມລັບ ເຮົາຄວນຈະຢືນຢູ່ໃນບ່ອນນີ້ແລ"

ລໍາດັບນັ້ນ ພຣະເຈົ້າປະເສນທິໂກສົນໄດ້ຊົງງຽບສຽງ ສະເດັດເຂົ້າໄປສູ່ພຣະວິຫານຫລັງນັ້ນເຊິ່ງມີປະຕູອັດສະນິດດີແລ້ວ ບໍ່ໄດ້ຊົງຮີບຮ້ອນ ສະເດັດເຂົ້າໄປສູ່ລະບຽງ ຊົງອະແຮມ ແລ້ວຊົງເຄາະກອນປະຕູຈັກໜ້ອຍ ພຣະຜູ້ມີພຣະພາກເຈົ້າຊົງໄຂປະຕູຮັບ

ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນສະເດັດເຂົ້າໄປສູ່ພຣະວິຫານ ຊົງຊົບພຣະສຽນລົງຈູບພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍປາກ ຊົງນວດພຣະບາດທັງສອງດ້ວຍຝາພຣະຫັດ ທັງສອງ ແລະ ຊົງປະກາດພຣະນາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍຄືພຣະເຈົ້າປະເສນທິໂກສົນ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍຄືພຣະເຈົ້າປະເສນທິໂກສົນ"

## ຊົງສັນເສີນພຣະທໍາວິໄນ

[໓໗໗] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ມະຫາບໍພິດ ພຣະອົງຊົງເຫັນອໍານາດປະໂຫຍດອັນໃດ ຈຶ່ງຊົງກະທໍາຄວາມນອບນ້ອມເປັນຢ່າງຍິ່ງໃນສະຣີຣະນີ້ເຖິງພຽງນີ້ ແລະຊົງສະແດງອາການສັນນິດເຖິງພຽງນີ້"

ພຣະເຈົ້າປະເສນທິໂກສົນທູນຕອບວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້ານ້ອຍມີຄວາມເຫັນຄວນຕາມທໍາໆໃນພຣະຜູ້ມີພຣະພາກເຈົ້າວ່າ "ພຣະຜູ້ມີພຣະພາກເຈົ້າຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຣະທໍາອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີແລ້ວ"

ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂ້ານ້ອຍເຫັນສະມະນະພາມ ພວກໜຶ່ງປະພຶດພົມມະຈັນມີກໍານົດ ໑໐ ປີແດ່ ໒໐ ປີແດ່ ໓໐ ປີແດ່ ໔໐ ປີແດ່ ສະໄໝຕໍ່ມາ ສະມະນະພາມເຫຼົ່ານັ້ນອາບນໍ້າດໍາຫົວ ລູບໄລ້ຢ່າງດີ ແຕ່ງຜົມແລະໜວດ ປົນເປີຕົນໃຫ້ເອີບອິ່ມພຽບພ້ອມດ້ວຍກາມມະຄຸນ ໕ ປະການ ແຕ່ຂ້ານ້ອຍໄດ້ເຫັນພິກຂຸ ທັງຫລາຍໃນພຣະທໍາວິໄນນີ້ ປະພຶດພົມມະຈັນອັນບໍລິສຸດບໍລິບູນ ມອບກາຍຖວາຍຊີວິດຢູ່

ອັນໜຶ່ງ ຂ້ານ້ອຍບໍ່ເຫັນພົມມະຈັນອື່ນທີ່ບໍລິສຸດ ບໍລິບູນແນວນີ້ ນອກຈາກພຣະທຳວິໄນນີ້

ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂໍ້ນີ້ເອງທີ່ຂ້ານ້ອຍມີຄວາມເຫັນຄວນຕາມທຳ ໃນພຣະຜູ້ມີພຣະພາກເຈົ້າວ່າ "ພຣະຜູ້ມີພຣະພາກເຈົ້າ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີແລ້ວ"

[໓໗໘] ຂ້າແດ່ ພຣະອົງຜູ້ຈະເລີນ ອີກປະການໜຶ່ງ ແມ່ນພຣະຣາຊາຍັງຜິດຖຽງກັບພຣະຣາຊາ ແມ່ນກະສັດຍັງຜິດຖຽງກັບກະສັດ ແມ່ນພາມຍັງຜິດຖຽງກັບພາມ ແມ່ນຄະຫະບໍດີຍັງຜິດຖຽງກັບຄະຫະບໍດີ ແມ່ນມານດາຍັງຜິດຖຽງກັບບຸດ ແມ່ນບຸດຍັງຜິດຖຽງກັບມານດາ ແມ່ນບິດາຍັງຜິດຖຽງກັບບຸດ ແມ່ນບຸດຍັງຜິດຖຽງກັບບິດາ ແມ່ນອ້າຍນ້ອງຊາຍຍັງຜິດຖຽງກັບ ເອື້ອຍນ້ອງສາວ ແມ່ນເອື້ອຍນ້ອງສາວຍັງຜິດຖຽງກັບອ້າຍນ້ອງຊາຍ ແມ່ນສະຫາຍກໍຍັງຜິດຖຽງກັບສະຫາຍ ແຕ່ຂ້ານ້ອຍໄດ້ເຫັນພິກຂຸທັງຫລາຍໃນພຣະທຳວິໄນນີ້ ສະໝັກສະມານສາມັກຄີ ບໍ່ຜິດຖຽງກັນ ເຂົ້າກັນໄດ້ສະນິດຄືນ້ຳກັບນ້ຳນົມ ແນມເບິ່ງກັນແລະກັນດ້ວຍສາຍຕາປ່ຽມດ້ວຍຄວາມຮັກຢູ່ ຂ້ານ້ອຍບໍ່ເຫັນບໍລິສັດອື່ນທີ່ສະໝັກສະມານສາມັກຄີກັນແນວນີ້ ນອກຈາກບໍລິສັດນີ້

ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂໍ້ນີ້ເອງທີ່ຂ້ານ້ອຍມີຄວາມເຫັນຄວນຕາມທຳ ໃນພຣະຜູ້ມີພຣະພາກເຈົ້າວ່າ "ພຣະຜູ້ມີພຣະພາກເຈົ້າຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີແລ້ວ"

[໓໗໙] ອີກປະການໜຶ່ງ ຂ້ານ້ອຍຍ່າງທ່ຽວຊົມຮອບ ໆ ພຣະອາຣາມຮອບ ໆ ອຸທະຍານໄປມາ ໃນບ່ອນນັ້ນ ໆ ຂ້ານ້ອຍໄດ້ເຫັນສະມະນະພາມພວກຫນຶ່ງ ຈ່ອຍແຫ້ງ ມີຜິວພັນ ບໍ່ຜ່ອງໃສ ຈ່ອຍເຫຼືອງ ຕາມໂຕສະພັ່ງໄປດ້ວຍເສັ້ນເອັນ ເບິ່ງຄືວ່າຈະບໍ່ກ້າສືບຕາຄົນ ຂ້ານ້ອຍນັ້ນໄດ້ເກີດຄວາມດຳຣິວ່າ "ທ່ານເຫລົ່ານີ້ຄົງບໍ່ຍິນດີປະພຶດພົມມະຈັນເປັນແນ່ ຫຼືວ່າທ່ານເຫຼົ່ານັ້ນມີບາບກຳອັນໃດ ທີ່ເຮັດແລ້ວປົກປິດໄວ້ ທ່ານເຫຼົ່ານັ້ນຈຶ່ງຈ່ອຍແຫ້ງ ມີຜິວພັນບໍ່ຜ່ອງໃສ ຈ່ອຍເຫຼືອງຕາມໂຕສະພັ່ງໄປດ້ວຍເສັ້ນເອັນ ເບິ່ງຄືວ່າຈະບໍ່ກ້າສືບຕາຄົນ"

ຂ້ານ້ອຍເຂົ້າໄປຫາສະມະນະພາມເຫຼົ່ານັ້ນ ແລ້ວຖາມແນວນີ້ວ່າ "ທ່ານຜູ້ມີອາຍຸທັງຫລາຍ ເຫດໃດ ພວກທ່ານຈຶ່ງຈ່ອຍແຫ້ງ ເສົ້າໝອງ ມີຜິວພັນບໍ່ຜ່ອງໃສ ຈ່ອຍເຫຼືອງ ຕາມໂຕສະພັ່ງໄປດ້ວຍເສັ້ນເອັນ ເບິ່ງຄືວ່າຈະບໍ່ກ້າສືບຕາຄົນ"

ສະມະນະພາມເຫຼົ່ານັ້ນໄດ້ຕອບແນວນີ້ວ່າ "ມະຫາບໍພິດ ພວກອາດຕະມາພາບເປັນພະຍາດພັນທຸກຳ"

ແຕ່ຂ້ານ້ອຍໄດ້ເຫັນພິກຂຸທັງຫລາຍໃນພຣະທຳວິໄນນີ້ ແຈ່ມໃສຍິ່ງ ມີໃຈຊື່ນບານ ມີຮູບອັນໜ້າຍິນດີ ມີອິນຊີຜ່ອງໃສ ມີຄວາມຂົນຂວາຍນ້ອຍ ບໍ່ຢ້ານກົວ ລ້ຽງຊີບດ້ວຍຂອງທີ່ຜູ້ອື່ນໃຫ້ ມີຈິດຢູ່ຄືກວາງ

ຂ້ານ້ອຍນັ້ນໄດ້ດຳຣິວ່າ "ທ່ານເຫລົ່ານີ້ ຄົງຮູ້ຄຸນວິເສດຂຶ້ນໄປກວ່າເດີມໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າເປັນແນ່ ທ່ານເຫລົ່ານີ້ຈຶ່ງແຈ່ມໃສຍິນດີຍິ່ງ ມີຈິດຊື່ນບານ ມີຮູບອັນໜ້າ ຍິນດີ ມີອິນຊີຜ່ອງໃສ ມີຄວາມຂົນຂວາຍນ້ອຍ ບໍ່ຢ້ານກົວ ລ້ຽງຊີບດ້ວຍຂອງທີ່ຜູ້ອື່ນໃຫ້ ມີຈິດຢູ່ຄືກວາງ"

ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂໍ້ນີ້ເອງທີ່ຂ້ານ້ອຍມີຄວາມເຫັນຄວນຕາມທຳ ໃນພຣະຜູ້ມີພຣະພາກເຈົ້າວ່າ "ພຣະຜູ້ມີພຣະພາກເຈົ້າຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີແລ້ວ"

[໓໗໐] ອີກປະການໜຶ່ງ ຂ້ານ້ອຍ ເປັນຣາຊາມະຫາກະສັດຜູ້ໄດ້ຮັບມຸດທາພິເສກແລ້ວ ຍ່ອມສາມາດທີ່ຈະຂ້າຄົນທີ່ສົມຄວນຂ້າໄດ້ ຈະໃຫ້ຢຶດຊັບຂອງຄົນທີ່ສົມຄວນຢຶດໄດ້ ຈະໃຫ້ເນຣະເທດຄົນທີ່ສົມຄວນເນຣະເທດໄດ້ ເມື່ອຂ້ານ້ອຍນັ່ງຢູ່ໃນບ່ອນວິນິດໄສອັດຖະຄະດີ ກໍຍັງມີຄົນທັງຫລາຍເວົ້າແຊກຂຶ້ນມາໃນລະຫວ່າງ ໆ ຂ້ານ້ອຍນັ້ນບໍ່ໄດ້ເພື່ອຈະຫ້າມວ່າ "ທ່ານຜູ້ຈະເລີນທັງຫລາຍ ເມື່ອເຮົານັ່ງຢູ່ໃນບ່ອນວິນິດໄສອັດຖະຄະດີ ພວກທ່ານຢ່າເວົ້າແຊກຂຶ້ນລະຫວ່າງ ຄຳເວົ້າຂອງເຮົາ ຈົ່ງຖ້າໃຫ້ເຮົາເວົ້າຈົບສາກ່ອນ"

ຄົນທັງຫລາຍກໍຍັງເວົ້າແຊກຂຶ້ນໃນລະຫວ່າງຄຳເວົ້າຂອງຂ້ານ້ອຍ ແຕ່ຂ້ານ້ອຍໄດ້ເຫັນພິກຂຸທັງຫລາຍໃນພຣະທຳວິໄນນີ້ ໃນສະໄໝທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳແກ່ ບໍລິສັດຫຼາຍຮ້ອຍ ສາວົກທັງຫລາຍຂອງພຣະຜູ້ມີພຣະພາກເຈົ້າ ກໍບໍ່ມີສຽງໄອຫຼືສຽງຈາມເລີຍ

ເລື້ອງເຄີຍມີມາແລ້ວ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳແກ່ບໍລິສັດຫຼາຍຮ້ອຍ ໃນບໍລິສັດນັ້ນ ສາວົກຂອງພຣະຜູ້ມີພຣະພາກເຈົ້າຮູບໜຶ່ງໄດ້ໄອຂຶ້ນ ເພື່ອນພົມມະຈາຣີອົງໜຶ່ງໄດ້ໃຊ້ເຂົ່າສະກິດທ່ານ ດ້ວຍຄວາມປະສົງໃຫ້ທ່ານຮູ້ສຶກໂຕໄດ້ວ່າ "ທ່ານຈົ່ງງຽບ ຢ່າເຮັດສຽງດັງໄປ ພຣະຜູ້ມີພຣະພາກເຈົ້າ ຜູ້ເປັນສາດສະດາຂອງເຮົາທັງຫລາຍຊົງສະແດງທຳຢູ່"

ຂ້ານ້ອຍນັ້ນ ໄດ້ດຳຣິວ່າ "ທ່ານຜູ້ຈະເລີນທັງຫລາຍ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າຊົງແນະນຳບໍລິສັດຢ່າງດີແນວນີ້ ໂດຍບໍ່ຕ້ອງໃຊ້ອາດຍາ ໂດຍບໍ່ຕ້ອງ ໃຊ້ອາວຸດເລີຍ" ຂ້ານ້ອຍ ບໍ່ເຫັນບໍລິສັດອື່ນທີ່ໄດ້ຮັບການແນະນຳຢ່າງດີແນວນີ້ ນອກຈາກ ບໍລິສັດນີ້

ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂໍ້ນີ້ເອງທີ່ຂ້ານ້ອຍມີຄວາມເຫັນຄວນຕາມທຳ ໃນພຣະຜູ້ມີພຣະພາກເຈົ້າວ່າ "ພຣະຜູ້ມີພຣະພາກເຈົ້າຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີແລ້ວ"

[໓໗໑] ອີກປະການໜຶ່ງ ຂ້ານ້ອຍໄດ້ເຫັນກະສັດ ຜູ້ເປັນບັນດິດລາງພວກ ໃນໂລກນີ້ ມີປັນຍາລະອຽດອ່ອນ ໂຕ້ວາທະກັບຄົນອື່ນໄດ້ ສາມາດນັບຂົນຊາຍໄດ້ ກະສັດເຫຼົ່ານັ້ນຄືດັ່ງທ່ຽວທຳລາຍທິດຖິຂອງຜູ້ອື່ນດ້ວຍປັນຍາ ພໍໄດ້ຟັງຂ່າວວ່າ "ທ່ານຜູ້ຈະເລີນທັງຫລາຍ ໄດ້ຂ່າວວ່າພຣະສະມະນະໂຄດົມຈັກສະເດັດມາເຖິງເຮືອນ ຫຼື ນິຄົມຊື່ນັ້ນ" ກະສັດເຫຼົ່ານັ້ນກໍພາກັນແຕ່ງບັນຫາດ້ວຍຕັ້ງໃຈວ່າ "ເຮົາທັງຫລາຍຈັກພາກັນເຂົ້າໄປຫາພຣະສະມະນະໂຄດົມແລ້ວຖາມບັນຫານີ້ ຖ້າພຣະສະມະນະໂຄດົມຖືກເຮົາທັງຫລາຍຖາມແລ້ວແນວນີ້ ຈັກຕັດຕອບແນວນີ້ ເຮົາທັງຫລາຍຈັກໂຕ້ວາທະແນວນີ້ກັບພຣະສະມະນະໂຄດົມ ຖ້າແມ່ນພຣະສະມະນະໂຄດົມຖືກເຮົາທັງຫລາຍຖາມແລ້ວແນວນີ້ ຈັກຕັດຕອບແນວນີ້ ເຮົາທັງຫລາຍຈັກໂຕ້ວາທະແນວນີ້ກັບພຣະສະມະນະໂຄດົມ"

ກະສັດເຫຼົ່ານັ້ນໄດ້ຟັງຂ່າວວ່າ "ທ່ານຜູ້ຈະເລີນທັງຫລາຍ ໄດ້ຂ່າວວ່າ ພຣະສະມະນະໂຄດົມ ສະເດັດມາເຖິງເຮືອນຫຼືນິຄົມນັ້ນ" ແລ້ວກໍພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ກະສັດເຫຼົ່ານັ້ນເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ກະສັດເຫຼົ່ານັ້ນທີ່ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ກໍບໍ່ທູນຖາມບັນຫາກັບພຣະຜູ້ມີພຣະພາກເຈົ້າອີກ ຢູ່ໄສຈັກໂຕ້ວາທະກັບພຣະອົງໄດ້ນໍ ໂດຍແທ້ທີ່ຈິງກໍພາກັນຍອມຕົນເຂົ້າເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າ

ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂໍ້ນີ້ເອງທີ່ຂ້ານ້ອຍມີຄວາມເຫັນຄວນຕາມທຳຂອງພຣະຜູ້ມີພຣະພາກເຈົ້າວ່າ "ພຣະຜູ້ມີພຣະພາກເຈົ້າຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີແລ້ວ"

[໓໗໘] ອີກປະການໜຶ່ງ ຂ້ານ້ອຍໄດ້ເຫັນພາມຜູ້ເປັນບັນດິດ ຯລຯ ຄະຫະບໍດີຜູ້ເປັນບັນດິດ ຯລຯ ສະມະນະຜູ້ເປັນບັນດິດລາງພວກໃນໂລກນີ້ ມີປັນຍາລະອຽດອ່ອນ ໂຕ້ວາທະກັບຄົນອື່ນໄດ້ ສາມາດນັບຂົນຊາຍໄດ້ ສະມະນະເຫຼົ່ານັ້ນຄືດັ່ງທ່ຽວ ທຳລາຍທິດຖິຂອງຜູ້ອື່ນດ້ວຍປັນຍາ ພໍໄດ້ຟັງຂ່າວວ່າ "ທ່ານຜູ້ຈະເລີນທັງຫລາຍ ໄດ້ຂ່າວວ່າ ພຣະສະມະນະໂຄດົມຈັກສະເດັດມາ

ເຖິງເຮືອນຫຼືນິຄົມຊື່ນັ້ນ" ສະມະນະເຫຼົ່ານັ້ນກໍພາກັນແຕ່ງ ບັນຫາ ດ້ວຍຕັ້ງໃຈວ່າ "ເຮົາທັງຫລາຍຈັກພາກັນເຂົ້າໄປຫາພຣະສະມະນະໂຄດົມແລ້ວຖາມບັນຫານີ້ ຖ້າພຣະໂຄດົມຖືກເຮົາທັງຫລາຍຖາມແລ້ວແນວນີ້ ຈັກຕັດຕອບແນວນີ້ ເຮົາທັງຫລາຍ ຈັກໂຕ້ວາທະແນວນີ້ກັບພຣະສະມະນະໂຄດົມ ຖ້າແມ່ນພຣະສະມະນະໂຄດົມຖືກເຮົາທັງຫລາຍຖາມແລ້ວແນວນີ້ ຈັກຕັດຕອບແນວນີ້ ເຮົາທັງຫລາຍຈັກໂຕ້ວາທະແນວນີ້ກັບພຣະສະມະນະໂຄດົມ"

ສະມະນະເຫຼົ່ານັ້ນໄດ້ຟັງຂ່າວວ່າ "ທ່ານຜູ້ຈະເລີນທັງຫລາຍ ໄດ້ຂ່າວວ່າ ພຣະສະມະນະໂຄດົມ ສະເດັດມາເຖິງເຮືອນຫຼືນິຄົມນັ້ນ" ແລ້ວ ກໍພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ສະມະນະເຫຼົ່ານັ້ນເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຣ່ຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ສະມະນະເຫຼົ່ານັ້ນທີ່ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈ ໃຫ້ອາດຫານແກ່ກ້າ ຮວຍຣ່ຳໃຈໃຫ້ສົດຊື່ນແຈ່ມໃສ ດ້ວຍທຳມີກະຖາກໍບໍ່ທູນຖາມ ບັນຫາກັບພຣະຜູ້ມີພຣະພາກເຈົ້າອີກ ຢູ່ໄສຈັກໂຕ້ວາທະກັບພຣະອົງໄດ້ນໍ ໂດຍແທ້ທີ່ຈິງກໍຂໍໂອກາດເພື່ອອອກຈາກເຮືອນບວດເປັນບັນພະຊິດກັບພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າກໍຊົງໃຫ້ພວກເຂົາບວດ ພວກເຂົາເມື່ອບວດແລ້ວແນວນີ້ກໍໜີໄປຢູ່ຜູ້ດຽວ ບໍ່ພະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ພວກເຂົາ ພາກັນກ່າວແນວນີ້ວ່າ "ເຮົາທັງຫລາຍບໍ່ພິນາດລະຊິນໍ ທ່ານຜູ້ຈະເລີນ ເຮົາທັງຫລາຍ ບໍ່ພິນາດລະຊິນໍ ທ່ານຜູ້ຈະເລີນ ດ້ວຍວ່າ ແຕ່ກ່ອນເຮົາທັງຫລາຍບໍ່ໄດ້ເປັນສະມະນະເລີຍ ກໍປະຕິຍານວ່າ "ເປັນສະມະໜະ" ບໍ່ໄດ້ເປັນພາມເລີຍກໍປະຕິຍານວ່າ "ເປັນພາມ" ບໍ່ໄດ້ເປັນພຣະອະຣະຫັນເລີຍກໍປະຕິຍານວ່າ "ເປັນພຣະອະຣະຫັນ" ບັດນີ້ ເຮົາທັງຫລາຍເປັນສະມະນະ ເປັນພາມ ເປັນພຣະອະຣະຫັນ"

ຂ້າແດ່ພຣະອົງຜູ້ຈະເລີນ ແມ່ນຂໍ້ນີ້ເອງທີ່ຂ້ານ້ອຍມີຄວາມເຫັນຄວນຕາມທຳ ໃນພຣະຜູ້ມີພຣະພາກເຈົ້າວ່າ "ພຣະຜູ້ມີພຣະພາກເຈົ້າຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີແລ້ວ"

[໓໗໓] ອີກປະການໜຶ່ງ ຊ່າງໄມ້ຊື່ອິຊິທັນຕະ ແລະ ຊ່າງໄມ້ຊື່ປຸຣານະເຫລົ່ານີ້ ກິນຢູ່ກັບຂ້ານ້ອຍ ໃຊ້ຍວດຍານຂອງຂ້ານ້ອຍ ຂ້ານ້ອຍໃຫ້ເຄື່ອງລ້ຽງຊີບແກ່ເຂົາ ຕັ້ງຍົດໃຫ້ເຂົາ ແຕ່ຢ່າງໃດກໍ່ຕາມ ພວກເຂົາຈະທຳຄວາມເຄົາລົບນົບນອບໃນຂ້ານ້ອຍຄື ໃນພຣະຜູ້ມີພຣະພາກເຈົ້າກໍບໍ່ແມ່ນ

ເລື້ອງເຄີຍມີມາແລ້ວ ຂ້ານ້ອຍຍົກກອງທັບອອກໄປ ເມື່ອຈະທົດລອງຊ່າງໄມ້ຊື່ ອິຊິທັນຕະແລະຊ່າງໄມ້ຊື່ປຸຣານະເຫລົ່ານີ້ ຈຶ່ງເຂົ້າພັກໃນບ່ອນພັກອັນແຄບແຫ່ງໜຶ່ງ ຄັ້ງນັ້ນແລ ຊ່າງໄມ້ຊື່ອິຊິທັນຕະ ແລະ ຊ່າງໄມ້ຊື່ປຸຣານະ ເຫລົ່ານີ້ໃຊ້ເວລາໃຫ້ໝົດໄປດ້ວຍການສົນທະນາທຳມີກະຖາຕະຫຼອດຣາຕີເປັນສ່ວນໃຫຍ່ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທາງທິດໃດ ພວກເຂົາກໍຫັນຫົວໄປທາງທິດນັ້ນ ນອນຢຽດຕີນມາທາງຂ້ານ້ອຍ ຂ້ານ້ອຍນັ້ນໄດ້ ດຳຣິວ່າ "ທ່ານຜູ້ຈະເລີນທັງຫລາຍ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ຊ່າງໄມ້ຊື່ອິຊິທັນຕະ ແລະ ຊ່າງໄມ້ຊື່ປຸຣານະເຫລົ່ານີ້ກິນຢູ່ກັບເຮົາ ໃຊ້ຍວດຍານຂອງເຮົາ ເຮົາໃຫ້ເຄື່ອງລ້ຽງຊີບແກ່ພວກເຂົາ ຕັ້ງຍົດໃຫ້ພວກເຂົາ ແຕ່ຢ່າງໃດກໍ່ຕາມ ພວກເຂົາຈະໄດ້ທຳຄວາມເຄົາລົບນົບນອບໃນເຮົາ ຄື ໃນພຣະຜູ້ມີພຣະພາກເຈົ້າກໍບໍ່ແມ່ນ ທັງ ໘ ຄົນນີ້ຄົງຈະຮູ້ຄຸນວິເສດຍິ່ງຂຶ້ນໄປ ກວ່າເດີມໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນແນ່"

ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນຂໍ້ນີ້ເອງທີ່ຂ້ານ້ອຍມີຄວາມເຫັນຄວນຕາມທຳ ໃນພຣະຜູ້ມີພຣະພາກເຈົ້າວ່າ "ພຣະຜູ້ມີພຣະພາກເຈົ້າຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ປະຕິບັດດີແລ້ວ"

## ພຣະພຸດທະເຈົ້າກັບພຣະເຈົ້າປະເສນທິໂກສົນມີພະຊົນທ່ໍກັນ

[៣໗໘] ຂ້າແດ່ ພຣະອົງຜູ້ຈະເລີນ ອີກປະການໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນກະສັດ ແມ່ນຂ້ານ້ອຍກໍເປັນກະສັດ ພຣະຜູ້ມີພຣະພາກເຈົ້າຊົງເປັນຊາວໂກສົນ ແມ່ນຂ້ານ້ອຍກໍເປັນຊາວໂກສົນ ພຣະຜູ້ມີພຣະພາກເຈົ້າຊົງມີພຣະຊົນມາຍຸ ໘໐ ພັນສາ ແມ່ນຂ້ານ້ອຍກໍມີ ອາຍຸ ໘໐ ປີ ແມ່ນດ້ວຍການທີ່ພຣະຜູ້ມີພຣະພາກເຈົ້າຊົງເປັນກະສັດ ແມ່ນຂ້ານ້ອຍກໍເປັນ ກະສັດ ພຣະຜູ້ມີພຣະພາກເຈົ້າຊົງເປັນຊາວໂກສົນ ແມ່ນຂ້ານ້ອຍກໍເປັນຊາວໂກສົນ ພຣະຜູ້ມີພຣະພາກເຈົ້າຊົງມີພຣະຊົນມາຍຸ ໘໐ ພັນສາ ແມ່ນຂ້ານ້ອຍກໍມີອາຍຸ ໘໐ ປີນີ້ ຂ້ານ້ອຍ ຈຶ່ງໄດ້ທຳຄວາມເຄົາລົບນົບນອບເປັນຢ່າງຍິ່ງໃນພຣະຜູ້ມີພຣະພາກເຈົ້າ ແລະ ສະແດງອາການສັນມິດ ເຖິງພຽງນີ້ ຖ້າຈັ່ງຊັ້ນ ບັດນີ້ ຂ້ານ້ອຍຂໍທູນລາກັບ ຍ້ອນມີກິດ ມີໜ້າທີ່ທີ່ຈະຕ້ອງເຮັດອີກຫຼາຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມະຫາບໍພິດ ຂໍພຣະອົງຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

ລຳດັບນັ້ນ ພຣະເຈົ້າປະເສນທິໂກສົນຊົງລຸກຈາກທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກ ຊົງກະທຳປະທັກຂິນແລ້ວສະເດັດຈາກໄປ

ຄັ້ງນັ້ນແລ ເມື່ອພຣະເຈົ້າປະເສນທິໂກສົນສະເດັດຈາກໄປບໍ່ດົນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫລາຍມາຕັດວ່າ "ພິກຂຸທັງຫລາຍ ພຣະເຈົ້າປະເສນທິໂກສົນພຣະອົງນີ້ຕັດທຳເຈດີ ຊົງລຸກຈາກທີ່ປະທັບແລ້ວສະເດັດຈາກໄປ ທ່ານທັງຫລາຍຈົ່ງຮຽນທຳເຈດີ ຈົ່ງສຶກສາຈົ່ງຊົງຈຳທຳເຈດີນີ້ໄວ້ ພິກຂຸທັງຫລາຍ ທຳເຈດີປະກອບດ້ວຍປະໂຫຍດ ເປັນອາທິພົມມະຈັນ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ທຳມະເຈຕິຍະສູດທີ ໙ ຈົບ**

# ໑໐. ກັນນະກັດຖະລະສູດ

## ວ່າດ້ວຍເຫດການທີ່ເຂດກັນນະກັດຖະລະ

[໓໗໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ເຂດກັນນະກັດຖະລະເປັນທີ່ໃຫ້ອະໄພ ໝູ່ເນື້ອ ໃກ້ນະຄອນຊື່ອຸທັນຍາ ສະໄໝນັ້ນແລ ພຣະເຈົ້າປະເສນທິໂກສົນສະເດັດໄປສູ່ອຸທັນຍານະຄອນ ດ້ວຍພຣະຣາຊະວຽກງານບາງຢ່າງ ໄດ້ຮັບສັ່ງຮຽກບຸຣຸດຄົນໜຶ່ງມາຕັດວ່າ

"ມາເທີ້ນ ທ້າວ ເຈົ້າຈົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ຈົ່ງທູນຖາມເຖິງພຣະສຸກພາບຄວາມມີພຣະໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ ຕາມຄຳຂອງເຮົາວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະເຈົ້າປະເສນທິໂກສົນຂໍຖວາຍອະພິວາດ ພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ທູນຖາມເຖິງພຣະສຸກພາບ ຄວາມມີພຣະໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນຢູ່ສຸກສະບາຍ" ແລະຈົ່ງ ຂາບທູນແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໄດ້ຮູ້ວ່າ ມື້ນີ້ພຣະເຈົ້າປະເສນທິໂກສົນສະເຫວີຍພຣະກະຍາຫານເຊົ້າສຳເລັດແລ້ວ ພາຍຫລັງເວລາພຣະກະຍາຫານ ຈັກສະເດັດມາເຝົ້າ ພຣະຜູ້ມີພຣະພາກເຈົ້າ"

ບຸຣຸດນັ້ນ ທູນຮັບສະໜອງພຣະຣາຊະດຳຣັດແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ພຣະເຈົ້າປະເສນທິໂກສົນຂໍຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ຊົງທູນຖາມເຖິງພຣະສຸກພາບ ຄວາມມີພຣະໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ ແລະ ຂາບທູນແນວນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໄດ້ຮູ້ວ່າ ມື້ນີ້ພຣະເຈົ້າປະເສນທິໂກສົນສະເຫວີຍພຣະກະຍາຫານເຊົ້າສຳເລັດແລ້ວ ພາຍຫລັງເວລາພຣະກະຍາຫານ ຈັກສະເດັດມາເຝົ້າພຣະຜູ້ມີພຣະພາກເຈົ້າຂ້ານ້ອຍ"

ພຣະພະຄິນີຊົງພຣະນາມວ່າໂສມາ ແລະ ພຣະພະຄິນີຊົງພຣະນາມວ່າສະກຸລາ ໄດ້ຊົງສະດັບຂ່າວວ່າ "ໄດ້ຂ່າວວ່າ ມື້ນີ້ ພຣະເຈົ້າປະເສນທິໂກສົນສະເຫວີຍພຣະກະຍາຫານເຊົ້າສຳເລັດແລ້ວ ພາຍຫລັງເວລາພຣະກະຍາຫານຈັກສະເດັດໄປເຝົ້າພຣະຜູ້ມີພຣະພາກເຈົ້າ" ເວລານັ້ນເອງ ພຣະພະຄິນີໂສມາ ແລະ ພຣະພະຄິນີສະກຸລາ ຈຶ່ງສະເດັດເຂົ້າໄປເຝົ້າພຣະເຈົ້າປະເສນທິໂກສົນໃນບ່ອນສະເຫວີຍພຣະກະຍາຫານ ແລ້ວໄດ້ຂາບທູນວ່າ

"ຂ້າແດ່ ມະຫາຣາດ ຖ້າເຊັ່ນນັ້ນ ຂໍພຣະອົງຈົ່ງຊົງຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ຈົ່ງຊົງຖາມເຖິງພຣະສຸກພາບ ຄວາມມີພຣະໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ ຕາມຄຳຂອງຂ້ານ້ອຍ ທັງສອງວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພະຄິນີໂສມາແລະພຣະພະຄິນີສະກຸລາ ຂໍຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ທູນຖາມເຖິງພຣະສຸກພາບຄວາມມີພຣະໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ ຂ້ານ້ອຍ"

## ພຣະເຈົ້າປະເສນທິໂກສົນເຂົ້າເຝົ້າພຣະພຸດທະເຈົ້າ

[໓໗໖] ລຳດັບນັ້ນ ພຣະເຈົ້າປະເສນທິໂກສົນສະເຫວີຍພຣະກະຍາຫານເຊົ້າສຳເລັດແລ້ວພາຍຫລັງເວລາພຣະກະຍາຫານ ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຊົງຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພະຄິນີໂສມາແລະພຣະພະຄິນີສະກຸລາ ຂໍຖວາຍອະພິວາດ ພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ທູນຖາມເຖິງພຣະສຸກພາບຄວາມມີ ພຣະໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ມະຫາບໍພິດ ພຣະພະຄິນີໂສມາແລະພຣະພະຄິນີສະກຸລາ ບໍ່ຊົງໄດ້ຜູ້ອື່ນເປັນທູດແລ້ວບໍ?"

ພຣະເຈົ້າປະເສນທິໂກສົນທູນຕອບວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພະຄິນີໂສມາ ແລະພຣະພະຄິນີສະກຸລາ ໄດ້ສະດັບຂ່າວວ່າ "ໄດ້ຂ່າວວ່າ ມື້ນີ້ ພຣະເຈົ້າປະເສນທິໂກສົນບໍຣິໂພກ ອາຫານເຊົ້າສຳເລັດແລ້ວ ພາຍຫລັງເວລາພຣະກະຍາຫານຈັກມາເຝົ້າພຣະຜູ້ມີພຣະພາກເຈົ້າ" ຄັ້ງນັ້ນ ພຣະພະຄິນີໂສມາແລະພຣະພະຄິນີສະກຸລາ ໄດ້ເຂົ້າມາຫາຂ້ານ້ອຍໃນບ່ອນບໍຣິໂພກອາຫານແລ້ວ ຮັບສັ່ງວ່າ "ຂ້າແດ່ ມະຫາຣາດ ຖ້າເຊັ່ນນັ້ນ ຂໍພຣະອົງຊົງຖວາຍອະພິວາດພຣະບາດທັງສອງ ຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ຂໍຈົງທູນຖາມເຖິງພຣະສຸກພາບຄວາມມີພຣະໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ ຕາມຄຳຂອງຂ້ານ້ອຍທັງສອງວ່າ "ພຣະພະຄິນີໂສມາ ແລະ ພຣະພະຄິນີສະກຸລາຂໍຖວາຍອະພິວາດພຣະບາດທັງສອງ ຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ແລະ ທູນຖາມເຖິງພຣະສຸກພາບຄວາມມີພຣະໂຣຄາພາດ ນ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ" ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມະຫາບໍພິດ ຂໍພຣະພະຄິນີໂສມາ ແລະ ພຣະພະຄິນີສະກຸລາ ຈົ່ງຊົງພຣະສຸກສະບາຍເທີ້ນ"

[໓໗໗] ລຳດັບນັ້ນ ພຣະເຈົ້າປະເສນທິໂກສົນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍໄດ້ຟັງມາແນວນີ້ວ່າ "ພຣະສະມະນະໂຄດົມຕັດແນວນີ້ວ່າ "ບໍ່ມີສະມະໜະຫຼືພາມຜູ້ເປັນສັບພັນຍູ ມີປົກກະຕິເຫັນທຳທັງປວງ ຈັກປະຕິຍານຍານທັດສະນະແນວຄົບຖ້ວນ ເຫດນີ້ເປັນໄປບໍ່ໄດ້" ຊົນເຫຼົ່າໃດກ່າວ ແນວນີ້ວ່າ "ພຣະສະມະນະໂຄດົມຕັດແນວນີ້ວ່າ "ບໍ່ມີສະມະໜະຫຼືພາມຜູ້ເປັນສັບພັນຍູ ມີປົກກະຕິເຫັນທຳທັງປວງ ຈັກປະຕິຍານຍານທັດສະນະແນວຄົບຖ້ວນ ເຫດນີ້ເປັນໄປບໍ່ໄດ້" ຊົນເຫຼົ່ານັ້ນຊື່ວ່າເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ດ້ວຍຄຳຕົວະຫຼື ຊື່ວ່າ ກ່າວແກ້ຢ່າງສົມເຫດສົມຜົນ ຫຼື ບໍ່ມີແດ່ຫຼືທີ່ຄຳກ່າວເຊັ່ນນັ້ນ ແລະ ຄຳທີ່ກ່າວຕໍ່ ໆ ກັນມາ ຈະເປັນເຫດໃຫ້ຖືກຕຳໜິໄດ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ມະຫາບໍພິດ ຊົນເຫຼົ່າໃດກ່າວແນວນີ້ວ່າ "ພຣະສະມະນະໂຄດົມຕັດແນວນີ້ວ່າ "ບໍ່ມີສະມະໜະຫຼືພາມຜູ້ເປັນສັບພັນຍູ ມີປົກກະຕິ ເຫັນທຳທັງປວງຈັກປະຕິຍານຍານທັດສະນະແນວຄົບຖ້ວນ ເຫດນີ້ເປັນໄປບໍ່ໄດ້" ຊົນເຫຼົ່ານັ້ນບໍ່ຊື່ວ່າເວົ້າກົງຕາມທີ່ອາດຕະມາພາບກ່າວແລ້ວ ຊື່ວ່າ ກ່າວຕູ່ອາດຕະມາພາບດ້ວຍຄຳຕົວະ ຂໍຖວາຍພຣະພອນ"

[໓໗໘] ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນຈຶ່ງຮັບສັ່ງຮຽກເສນາບໍດີຊື່ວິທູທພະມາ ຕັດວ່າ "ເສນາບໍດີ ໃຜໜອກລ່າວເລື້ອງນີ້ພາຍໃນພະຣາດຊະວັງ"

ວິທູທະພະເສນາບໍດີຂາບທູນວ່າ "ຂ້າແດ່ ມະຫາຣາດ ພາມຊື່ສັນຊັຍ ອາກາສະໂຄດ ກ່າວ ໂດຍຂ້ານ້ອຍ"

ຈາກນັ້ນ ພຣະເຈົ້າປະເສນທິໂກສົນຮັບສັ່ງຮຽກບຸຣຸດຄົນໜຶ່ງມາຕັດວ່າ "ມາເທີ້ນ ທ້າວ ທ່ານຈົ່ງໄປເຊີນພາມສັນໄຊ ອາກາສະໂຄດຕາມຄຳຂອງເຮົາວ່າ "ທ່ານຜູ້ຈະເລີນ ພຣະເຈົ້າປະ ເສນທິໂກສົນຮັບສັ່ງຮຽກທ່ານ"

ບຸຣຸດນັ້ນ ທູນຮັບສະໜອງພຣະຣາຊະດຳຣັດແລ້ວໄດ້ເຂົ້າໄປຫາພາມສັນໄຊ ອາກາສະ ໂຄດ ຮອດບ່ອນຢູ່ ແລ້ວກ່າວກັບພາມສັນໄຊ ອາກາສະໂຄດວ່າ "ທ່ານຜູ້ຈະເລີນ ພຣະເຈົ້າປະ ເສນທິໂກສົນຕັດຮຽກທ່ານ"

ຈາກນັ້ນ ພຣະເຈົ້າປະເສນທິໂກສົນໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະ ອົງ ຜູ້ຈະເລີນ ພຣະດຳຣັດແນວໜຶ່ງທີ່ພຣະຜູ້ມີພຣະພາກເຈົ້າຊົງໝາຍເອົາເນື້ອຄວາມບາງຢ່າງ ຕັດໄວ້ ແຕ່ຄົນກັບເຂົ້າໃຈພຣະດຳຣັດໄປອີກແນວໜຶ່ງ ມີແດ່ບໍ? ພຣະຜູ້ມີພຣະພາກເຈົ້າ ຍັງຊົງ ຈຳພຣະດຳຣັດທີ່ຕັດແລ້ວໄດ້ຢູ່ຫຼືບໍ່? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ມະຫາບໍພິດ ອາດຕະມາພາບຈືຄຳທີ່ກ່າວແລ້ວໄດ້ດີ ຄືຄຳທີ່ກ່າວໄວ້ແລ້ວແນວນີ້ວ່າ "ບໍ່ມີສະມະໜະຫຼືພາມຜູ້ຮູ້ ມີປົກກະຕິເຫັນທຳທັງປວງ ໃນເວລາ ດຽວກັນ ເຫດນີ້ເປັນໄປບໍ່ໄດ້"

ພຣະເຈົ້າປະເສນທິໂກສົນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກ ເຈົ້າ ໄດ້ຕັດສະພາບທີ່ເປັນເຫດ ທັງຍັງຕັດສະພາບທີ່ເປັນຜົນວ່າ "ບໍ່ມີສະມະໜະ ຫຼື ພາມຜູ້ຮູ້ ມີ ປົກກະຕິເຫັນທຳທັງປວງ ໃນເວລາດຽວກັນ ເຫດນີ້ເປັນໄປບໍ່ໄດ້"

## ວັນນະ ໔ ຈຳພວກ

ຂ້າແດ່ ພຣະອົງຜູ້ຈະເລີນ ວັນນະ ໔ ຈຳພວກນີ້ ຄື (໑) ກະສັດ (໒) ພາມ (໓) ແພດ (໔) ສູດ ວັນນະ ໔ ຈຳພວກນີ້ ຈະເພິ່ງມີຄວາມຜິດແຜກແຕກຕ່າງກັນແດ່ບໍ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມະຫາບໍພິດ ວັນນະ ໔ ຈຳພວກນີ້ ຄື (໑) ກະສັດ (໒) ພາມ (໓) ແພດ (໔) ສູດ ບັນດາວັນນະ ໔ ຈຳພວກນີ້ ວັນນະ ໒ ຈຳພວກ ຄື ກະສັດແລະ ພາມອາດຕະມາພາບກ່າວວ່າເປັນຜູ້ເລີດ ຄືເປັນທີ່ໄຫວ້ ເປັນທີ່ລຸກຮັບ ເປັນທີ່ຂາບໄຫວ້ ເປັນທີ່ ກະທຳສາມີຈິກຳ ຂໍຖວາຍພຣະພອນ"

ພຣະເຈົ້າປະເສນທິໂກສົນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍບໍ່ໄດ້ທູນຖາມ

ເຖິງຄວາມແປກກັນໃນປັດຈຸບັນກັບພຣະຜູ້ມີພຣະພາກເຈົ້າ ຂ້ານ້ອຍທູນຖາມເຖິງຄວາມແປກກັນໃນສຳປະຣາຍະພົບກັບພຣະຜູ້ມີພຣະພາກເຈົ້າຕ່າງໆຫາກ ວັນນະ ๔ ຈຳພວກນີ້ ຄື (໑) ກະສັດ (໒) ພາມ (໓) ແພດ (໔) ສູດ ວັນນະ ໔ ຈຳພວກນີ້ຈະເພິ່ງມີຄວາມຜິດແຜກແຕກຕ່າງໆ ກັນແດ່ບໍ ຂ້ານ້ອຍ"

## ອົງຂອງພິກຂຸຜູ້ພ່ຳເພັງພຽນ

[ມັກຸລ] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມະຫາບໍພິດ ອົງຂອງພິກຂຸຜູ້ພ່ຳເພັງພຽນ ມີ ໕ ປະການນີ້

ອົງຂອງພິກຂຸຜູ້ພ່ຳເພັງພຽນ ໕ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສັດທາ ເຊື່ອພຣະປັນຍາເຄື່ອງຕັດສະຮູ້ຂອງຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະໃນສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫລາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ"

໒. ເປັນຜູ້ມີສຸກພາບມີໂຣຄາພາດໜ້ອຍ ປະກອບດ້ວຍໄຟທາດສຳລັບຍ່ອຍອາຫານ ສະໝ່ຳສະເໝີ ບໍ່ເຢັນຫຼາຍ ບໍ່ຮ້ອນຫຼາຍ ປານກາງ ເໝາະແກ່ການພ່ຳເພັງພຽນ

໓. ເປັນຜູ້ບໍ່ໂອ້ອວດ ບໍ່ມີມານຍາ ເຮັດຕົນໃຫ້ເປີດເຜີຍຕາມຄວາມເປັນຈິງໃນ ສາດສະດາ ຫຼື ໃນເພື່ອນພົມມະຈາຣີຜູ້ຮູ້ທັງຫລາຍ

໔. ເປັນຜູ້ຜາຣົບຄວາມພຽນ ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖີ້ເບົາໃນກຸສົນທຳ ທັງຫລາຍຢູ່

໕. ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນ ທັງຄວາມເກີດແລະຄວາມດັບ ອັນເປັນອະຣິຍະ ທຳລາຍກິເລດໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ

ມະຫາບໍພິດ ອົງຂອງພິກຂຸຜູ້ພ່ຳເພັງພຽນ ໕ ປະການນີ້ແລ

ວັນນະ ໔ ຈຳພວກນີ້ ຄື (໑) ກະສັດ (໒) ພາມ (໓) ແພດ (໔) ສູດ ຖ້າວັນນະ ໔ ຈຳພວກນັ້ນເປັນຜູ້ປະກອບດ້ວຍອົງຂອງພິກຂຸຜູ້ມີຄວາມພຽນ ໕ ປະການນີ້ ຂໍ້ນັ້ນກໍຈະເປັນໄປ

ເພື່ອປະໂຫຍດເກື້ອກູນ ເພື່ອສຸກແກ່ວັນນະ ໔ ຈຳພວກຕະຫຼອດການລະນານ ຂໍຖວາຍພຣະພອນ"

ພຣະເຈົ້າປະເສນທິໂກສົນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ວັນນະ ໔ ຈຳພວກນີ້ ຄື (໑) ກະສັດ (໒) ພາມ (໓) ແພດ (໔) ສູດ ຖ້າວັນນະ ໔ ຈຳພວກນັ້ນເປັນຜູ້ປະກອບດ້ວຍອົງຂອງພິກຂຸຜູ້ມີຄວາມພຽນ ໕ ປະການນີ້ ໃນຂໍ້ນີ້ ວັນນະ ໔ ຈຳພວກນັ້ນຈະມີອັນໃດຜິດແຜກແຕກຕ່າງກັນບໍ ຂ້ານ້ອຍ"

"ມະຫາບໍພິດ ໃນຂໍ້ນີ້ ອາດຕະມາພາບກ່າວເຖິງວັນນະທັງ ໔ ຈຳພວກ ມີຄວາມແຕກຕ່າງກັນດ້ວຍຄວາມພຽນ ປຽບຄືສັດຄູ່ໜຶ່ງ ເປັນຊ້າງທີ່ຄວນເຝິກກໍຕາມ ເປັນມ້າ ທີ່ຄວນເຝິກກໍຕາມ ເປັນງົວທີ່ຄວນເຝິກກໍຕາມ ເຂົາເຝິກດີແລ້ວ ແນະນຳດີແລ້ວ ຫຼືວ່າ ສັດຄູ່ໜຶ່ງຄືຊ້າງທີ່ຄວນເຝິກກໍຕາມ ມ້າທີ່ຄວນເຝິກກໍຕາມ ງົວທີ່ຄວນເຝິກກໍຕາມ ທີ່ຍັງບໍ່ໄດ້ເຝິກ ຍັງບໍ່ໄດ້ແນະນຳ

ມະຫາບໍພິດ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ສັດຄູ່ໜຶ່ງເປັນຊ້າງທີ່ຄວນເຝິກກໍຕາມ ເປັນມ້າທີ່ຄວນເຝິກກໍຕາມ ເປັນງົວທີ່ຄວນເຝິກກໍຕາມ ເຂົາເຝິກດີແລ້ວ ແນະນຳດີແລ້ວ ສັດຄູ່ໜຶ່ງທີ່ເຝິກແລ້ວທໍ່ນັ້ນ ເພິ່ງເຖິງເຫດຂອງສັດທີ່ເຝິກແລ້ວ ເພິ່ງບັນລຸພູມຂອງສັດທີ່ເຝິກແລ້ວ ບໍ່ແມ່ນບໍ? ຂໍຖວາຍພຣະພອນ"

"ແມ່ນ ຂ້ານ້ອຍ"

"ມະຫາບໍພິດ ສັດຄູ່ໜຶ່ງ ຈະເປັນຊ້າງທີ່ຄວນເຝິກກໍຕາມ ເປັນມ້າທີ່ຄວນເຝິກກໍຕາມ ເປັນງົວທີ່ຄວນເຝິກກໍຕາມ ເຂົາບໍ່ໄດ້ເຝິກ ບໍ່ໄດ້ແນະນຳ ສັດທີ່ເຂົາບໍ່ໄດ້ເຝິກເລີຍ ຈະເພິ່ງເຖິງເຫດຂອງສັດທີ່ເຝິກແລ້ວ ຈະບັນລຸເຖິງພູມຂອງສັດທີ່ເຝິກແລ້ວ ຄື ສັດຄູ່ນັ້ນຈະເປັນຊ້າງທີ່ຄວນເຝິກກໍຕາມ ເປັນມ້າທີ່ຄວນເຝິກກໍຕາມ ເປັນງົວທີ່ຄວນເຝິກກໍຕາມ ທີ່ເຂົາເຝິກແລ້ວ ແນະນຳດີແລ້ວໄດ້ແດ່ບໍ ຂໍຖວາຍພຣະພອນ"

ພຣະເຈົ້າປະເສນທິໂກສົນຂາບທູນວ່າ "ບໍ່ໄດ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມະຫາບໍພິດ ແນວນັ້ນຄືກັນ ເປັນໄປບໍ່ໄດ້ເລີຍ໑ທີ່ ອິດຖະຜົນໃດອັນບຸກຄົນຜູ້ມີສັດທາ ມີອາພາດໜ້ອຍ ບໍ່ໂອ້ອວດ ບໍ່ມີມານຍາ ຜາຣົບຄວາມພຽນ ມີປັນຍາ ເພິ່ງເຖິງອິດຖະຜົນນັ້ນ ບຸກຄົນຜູ້ບໍ່ມີສັດທາ ມີອາພາດຫຼາຍ ໂອ້ອວດ ມີມານຍາ ຂີ້ຄ້ານມີປັນຍາຊາມ ຈັກເຖິງໄດ້ ຂໍຖວາຍພຣະພອນ"

[໓໗໐] ພຣະເຈົ້າປະເສນທິໂກສົນ ທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກໄດ້ຕັດສພາບທີ່ເປັນເຫດ ທັງຍັງຕັດສະພາບທີ່ເປັນຜົນວ່າ "ວັນນະ ໔ ຈຳພວກນີ້ ຄື

(໑) ກະສັດ (໒) ພາມ (໓) ແພດ (໔) ສູດ ຖ້າວັນນະ ໔ ຈຳພວກນັ້ນ ເປັນຜູ້ປະກອບດ້ວຍອົງຂອງພິກຂຸຜູ້ມີຄວາມພຽນ ໕ ປະການນີ້ ແລະ ມີຄວາມພຽນ ຄືກັນ" ໃນຂໍ້ນີ້ ວັນນະ ໔ ຈຳພວກນີ້ ຈະເພິ່ງມີຄວາມຜິດແຜກແຕກຕ່າງກັນແດ່ບໍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ມະຫາບໍພິດ ໃນຂໍ້ນີ້ ອາດຕະມາພາບກ່າວວ່າວັນນະ ໔ ຈຳພວກນີ້ ບໍ່ແຕກຕ່າງກັນແມ່ນແຕ່ໜ້ອຍ ຄື ວິມຸດຕິກັບວິມຸດຕິບໍ່ແຕກຕ່າງກັນ ປຽບຄື ບຸຣຸດຜູ້ເກັບໄມ້ຈັກແຫ້ງມາກໍ່ໄຟ ໃຫ້ລຸກຮຸ່ງຂຶ້ນ ຕໍ່ມາບຸຣຸດອີກຄົນໜຶ່ງເກັບໄມ້ສາລະແຫ້ງມາກໍ່ໄຟໃຫ້ລຸກຮຸ່ງຂຶ້ນ ຕໍ່ມາບຸຣຸດອີກຄົນໜຶ່ງເກັບໄມ້ໝາກມ່ວງແຫ້ງມາກໍ່ໄຟໃຫ້ລຸກຮຸ່ງຂຶ້ນ ຕໍ່ມາບຸຣຸດອີກຄົນໜຶ່ງເກັບໄມ້ໝາກເດື່ອແຫ້ງມາກໍ່ໄຟ ໃຫ້ລຸກຮຸ່ງຂຶ້ນ

ມະຫາບໍພິດ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນັ້ນວ່າແນວໃດ ນ້ຳກັບນ້ຳ ສີກັບສີ ແສງກັບແສງ ຂອງໄຟທີ່ເກີດຂຶ້ນມາຈາກໄມ້ຕ່າງ ໆ ກັນນັ້ນ ຈະເພິ່ງມີຄວາມແຕກຕ່າງກັນແດ່ບໍ ຂໍຖວາຍພຣະພອນ"

"ບໍ່ມີຄວາມແຕກຕ່າງກັນເລີຍ ຂ້ານ້ອຍ"

"ແນວນັ້ນຄືກັນ ມະຫາບໍພິດ ອຳນາດອັນໃດຖືກຄວາມພຽນຍ່ຳຍີແລ້ວ ເກີດຂຶ້ນດ້ວຍຄວາມພຽນ ໃນອຳນາດນັ້ນອາດຕະມາພາບບໍ່ກ່າວວ່າແຕກຕ່າງກັນ ຄື ວິມຸດຕິກັບວິມຸດຕິບໍ່ແຕກຕ່າງກັນ ຂໍຖວາຍພຣະພອນ"

"ພຣະຜູ້ມີພຣະພາກເຈົ້າຕັດສະພາບທີ່ເປັນເຫດ ທັງຕັດສະພາບອັນເປັນຜົນ ເທວະດາມີແມ່ນບໍ? ຂ້ານ້ອຍ"

"ມະຫາບໍພິດ ຍ້ອນເຫດໃດ ພຣະອົງຈຶ່ງຕັດຖາມແນວນີ້ວ່າ "ເທວະດາມີແມ່ນບໍ? ຂ້ານ້ອຍ"

ພຣະເຈົ້າປະເສນທິໂກສົນ ຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າເທວະດາມີຈິງເທວະດາເຫຼົ່ານັ້ນມາສູ່ໂລກນີ້ບໍມາສູ່ໂລກນີ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມະຫາບໍພິດ ເທວະດາເຫຼົ່າໃດມີຄວາມບຽດບຽນ ເທວະດາເຫຼົ່ານັ້ນ ມາສູ່ໂລກນີ້ ເທວະດາເຫຼົ່າໃດບໍ່ມີຄວາມບຽດບຽນ ເທວະດາເຫຼົ່ານັ້ນ ບໍ່ມາສູ່ໂລກນີ້ ຂໍຖວາຍພຣະພອນ"

## ວາທະພຣະອານົນ

[໓໗໑] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ວິທູທະພະເສນາບໍດີໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ເທວະດາເຫຼົ່າໃດມີຄວາມບຽດບຽນມາສູ່ໂລກນີ້ ເທວະດາເຫຼົ່ານັ້ນຈັກຍັງເທວະດາທັງຫລາຍຜູ້ບໍ່ມີຄວາມບຽດບຽນ ຜູ້ບໍ່ມາສູ່ໂລກນີ້ໃຫ້ຈຸຕິ ຫຼື ຈັກຂັບໄລ່ເສຍຈາກທີ່ນັ້ນຫຼືບໍ? ຂ້ານ້ອຍ"

ຄັ້ງນັ້ນ ທ່ານພຣະອານົນໄດ້ຄິດວ່າ "ວິທູທະພະເສນາບໍດີນີ້ເປັນພຣະຣາຊະໂອຣົດຂອງພຣະເຈົ້າປະເສນທິໂກສົນ ເຮົາເປັນໂອຣົດຂອງພຣະຜູ້ມີພຣະພາກເຈົ້າ ບັດນີ້ເປັນການສົມຄວນທີ່ໂອຣົດກັບໂອຣົດຈະເພິ່ງປຶກສາກັນ" ລຳດັບນັ້ນ ທ່ານພຣະອານົນ ຈຶ່ງກ່າວກັບວິທູທະພະເສນາບໍດີ ວ່າ

"ເສນາບໍດີ ຖ້າເຊັ່ນນັ້ນ ໃນຂໍ້ນີ້ ອາດຕະມາພາບຈະຂໍຍ້ອນຖາມທ່ານກ່ອນ ທ່ານເພິ່ງຕອບບັນຫາຕາມທີ່ທ່ານພໍໃຈ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ພຣະຣາດຊະອານາຈັກຂອງພຣະເຈົ້າປະເສນທິໂກສົນມີປະມານທໍ່ໃດ ແລະ ໃນພຣະຣາດຊະອານາຈັກໃດ ພຣະເຈົ້າປະເສນທິໂກສົນຄອງຣາດເປັນອິດສະຣາທິບໍດີ ໃນພຣະຣາດຊະອານາຈັກນັ້ນ ພຣະອົງຊົງສາມາດຍັງສະມະໜະຫຼືພາມ ຜູ້ມີບຸນບໍມີບຸນ ຜູ້ປະພຶດພົມມະຈັນບໍປະພຶດພົມມະຈັນ ໃຫ້ຍ້າຍອອກ ຫຼື ຊົງເນຣະເທດຈາກທີ່ນັ້ນໄດ້ ບໍ່ແມ່ນບໍ?"

ວິທູທະພະເສນາບໍດີຕອບວ່າ "ພຣະຜູ້ເປັນເຈົ້າ ພຣະຣາດຊະອານາຈັກຂອງພຣະເຈົ້າປະເສນທິໂກສົນ ມີປະມານທໍ່ໃດ ແລະ ໃນພຣະຣາດຊະອານາຈັກໃດ ພຣະເຈົ້າປະເສນທິໂກສົນຄອງຣາດເປັນ ອິດສະຣາທິບໍດີ ໃນພຣະຣາດຊະອານາຈັກນັ້ນ ພຣະອົງຍ່ອມຊົງສາມາດຍັງສະມະໜະຫຼືພາມ ຜູ້ມີບຸນບໍມີບຸນ ຜູ້ປະພຶດພົມມະຈັນບໍປະພຶດພົມມະຈັນ ໃຫ້ຍ້າຍອອກຫຼືຊົງເນຣະເທດອອກຈາກບ່ອນນັ້ນໄດ້"

"ເສນາບໍດີ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ທີ່ອັນບໍ່ແມ່ນພຣະຣາດຊະອານາຈັກຂອງພຣະເຈົ້າປະເສນທິໂກສົນມີປະມານທໍ່ໃດ ແລະ ໃນບ່ອນໃດ ພຣະເຈົ້າປະເສນທິໂກສົນບໍ່ໄດ້ຄອງຣາດເປັນອິດສະຣາທິບໍດີ ໃນບ່ອນນັ້ນ ພຣະອົງຍ່ອມສາມາດຍັງສະມະໜະ ຫຼື ພາມຜູ້ມີບຸນບໍມີບຸນ ຜູ້ປະພຶດພົມມະຈັນບໍປະພຶດພົມມະຈັນ ໃຫ້ຍ້າຍອອກ ຫຼື ຊົງເນຣະເທດອອກຈາກບ່ອນນັ້ນໄດ້ບໍ?"

"ພຣະຜູ້ເປັນເຈົ້າ ທີ່ອັນບໍ່ແມ່ນພຣະຣາດຊະອານາຈັກຂອງພຣະເຈົ້າປະເສນທິໂກສົນມີປະມານທໍ່ໃດ ແລະ ໃນບ່ອນໃດພຣະເຈົ້າປະເສນທິໂກສົນບໍ່ໄດ້ຄອງຣາດເປັນອິດສະຣາທິບໍດີ ໃນບ່ອນນັ້ນ ພຣະອົງຍ່ອມບໍ່ຊົງສາມາດຈະຍັງສະມະໜະຫຼືພາມ ຜູ້ມີບຸນບໍມີບຸນ ຜູ້ປະພຶດພົມມະຈັນບໍປະພຶດພົມມະຈັນ ໃຫ້ຍ້າຍອອກ ຫຼື ຊົງເນຣະເທດເສຍຈາກ ທີ່ນັ້ນໄດ້"

"ເສນາບໍດີ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ທ່ານເຄີຍໄດ້ຍິນກ່ຽວກັບເທບຊັ້ນ ຕາວະຕິງສາມາແລ້ວບໍ?"

"ແມ່ນແລ້ວ ພຣະຜູ້ເປັນເຈົ້າ ຂ້ານ້ອຍໄດ້ຍິນກ່ຽວກັບເທບຊັ້ນຕາວະຕິງສາມາແລ້ວ ແມ່ນໃນບັດນີ້ ພຣະເຈົ້າປະເສນທິໂກສົນກໍຊົງສະດັບກ່ຽວກັບເທບຊັ້ນຕາວະຕິງສາມາແລ້ວ"

"ເສນາບໍດີ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ພຣະເຈົ້າປະເສນທິໂກສົນຈະຊົງສາມາດຍັງເທບຊັ້ນຕາວະຕິງສາ ໃຫ້ເຄື່ອນຫຼືຊົງເນຣະເທດອອກໄປຈາກບ່ອນນັ້ນໄດ້ບໍ່?"

ວິທູທະພະເສນາບໍດີ ຕອບວ່າ "ພຣະຜູ້ເປັນເຈົ້າ ພຣະເຈົ້າປະເສນທິໂກສົນບໍ່ຊົງສາມາດແມ່ນແຕ່ຈະທອດພຣະເນດເຫັນເທບຊັ້ນຕາວະຕິງສາ ບ່ອນໃດນໍຈະຊົງໃຫ້ເຄື່ອນ ຫຼື ຊົງເນຣະເທດອອກໄປຈາກບ່ອນນັ້ນໄດ້"

ທ່ານພຣະອານົນກ່າວວ່າ "ເສນາບໍດີ ແນວນັ້ນເໝືອນກັນ ເທບເຫຼົ່າໃດມີຄວາມບຽດບຽນມາສູ່ໂລກນີ້ ເທບເຫຼົ່ານັ້ນ ຍ່ອມບໍ່ສາມາດແມ່ນເພື່ອຈະເຫັນເທບຜູ້ບໍ່ມີຄວາມບຽດບຽນ ຜູ້ບໍ່ມາສູ່ໂລກນີ້ ບ່ອນໃດນໍຈັກໃຫ້ເຄື່ອນຫຼືເນຣະເທດອອກໄປຈາກບ່ອນນັ້ນໄດ້"

[໓໗໔] ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ພິກຂຸຮູບນີ້ຊື່ອັນໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸຮູບນີ້ຊື່ອານົນ ຂໍຖວາຍພຣະພອນ"

ພຣະເຈົ້າປະເສນທິໂກສົນທູນຖາມວ່າ "ພຣະຜູ້ເປັນເຈົ້າອານົນຮູບກໍງາມ ນາມກໍຍ້ອນຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ເປັນເຈົ້າອານົນກ່າວສະພາບທີ່ເປັນເຫດ ແລະ ກ່າວສະພາບທີ່ເປັນຜົນ ພົມມີແມ່ນບໍ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ມະຫາບໍພິດ ຍ້ອນເຫດໃດ ພຣະອົງຈຶ່ງຕັດຖາມແນວນີ້ວ່າ "ພົມມີແມ່ນບໍ? ຂ້ານ້ອຍ" ນໍ ມະຫາບໍພິດ"

ພຣະເຈົ້າປະເສນທິໂກສົນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າພົມມີຈິງ ພົມນັ້ນມາສູ່ໂລກນີ້ ຫຼື ບໍ່ມາສູ່ໂລກນີ້ໄດ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມະຫາບໍພິດ ພົມໃດມີຄວາມບຽດບຽນ ພົມນັ້ນມາສູ່ໂລກນີ້ ພົມໃດບໍ່ມີຄວາມບຽດບຽນ ພົມນັ້ນກໍບໍ່ມາສູ່ໂລກນີ້ ຂໍຖວາຍພຣະພອນ"

ລໍາດັບນັ້ນ ບຸຣຸດຄົນໜຶ່ງໄດ້ຂາບທູນພຣະເຈົ້າປະເສນທິໂກສົນວ່າ "ຂໍເດຊະ ພາມສັນໄຊອາກາສະໂຄດມາແລ້ວ ໂດຍຂ້ານ້ອຍ"

ຕໍ່ມາ ພຣະເຈົ້າປະເສນທິໂກສົນຈຶ່ງຕັດຖາມພາມສັນໄຊ ອາກາສະໂຄດວ່າ "ພາມໃຜນໍ? ກ່າວເລື້ອງນີ້ໄວ້ພາຍໃນພະຣາດຊະວັງ"

ພາມສັນໄຊ ອາກາສະໂຄດຂາບທູນວ່າ "ຂໍເດຊະ ວິທູທະພະເສນາບໍດີ ໂດຍຂ້ານ້ອຍ"

ວິທູທະພະເສນາບໍດີຂາບທູນແນວນີ້ວ່າ "ຂ້າແດ່ ມະຫາຣາດ ພາມສັນໄຊ ອາກາສະໂຄດ ໂດຍຂ້ານ້ອຍ"

ລຳດັບນັ້ນ ບຸຣຸດຄົນໜຶ່ງໄດ້ຂາບທູນພຣະເຈົ້າປະເສນທິໂກສົນວ່າ "ຂໍເດຊະ ບັດນີ້ ຍານພາຫະນະພ້ອມແລ້ວ ໂດຍຂ້ານ້ອຍ"

## ພຣະເຈົ້າປະເສນທິໂກສົນຊົງຊົມຊື່ນພຣະພາສິດຂອງພຣະພຸດທະເຈົ້າ

ລຳດັບນັ້ນ ພຣະເຈົ້າປະເສນທິໂກສົນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້ານ້ອຍໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າເຖິງຄວາມເປັນສັບພັນຍູ ພຣະຜູ້ມີພຣະພາກເຈົ້າກໍຊົງຕອບຄວາມເປັນສັບພັນຍູແລ້ວ ຂໍ້ທີ່ຊົງຕອບນັ້ນຂ້ານ້ອຍພໍໃຈແລະຖືກໃຈຫຼາຍ ແລະ ຂ້ານ້ອຍກໍຊົມຊື່ນດ້ວຍຂໍ້ທີ່ຊົງຕອບນັ້ນ

ຂ້ານ້ອຍ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າເຖິງຄວາມບໍລິສຸດຂອງວັນນະ ໔ ຈຳພວກ ພຣະຜູ້ມີພຣະພາກເຈົ້າກໍຊົງຕອບຄວາມບໍລິສຸດຂອງວັນນະ ໔ ຈຳພວກແລ້ວ ແລະ ຂໍ້ທີ່ຊົງຕອບນັ້ນ ຂ້ານ້ອຍພໍໃຈແລະຖືກໃຈຫຼາຍ ແລະ ຂ້ານ້ອຍກໍຊົມຊື່ນດ້ວຍຂໍ້ທີ່ຊົງຕອບນັ້ນ

ຂ້ານ້ອຍໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າເຖິງເທວະດາທີ່ຍິ່ງ ພຣະຜູ້ມີພຣະພາກເຈົ້າກໍຊົງຕອບເທວະດາທີ່ຍິ່ງ ຂໍ້ທີ່ຊົງຕອບນັ້ນຂ້ານ້ອຍພໍໃຈແລະຖືກໃຈຫຼາຍ ແລະ ຂ້ານ້ອຍກໍຊົມຊື່ນດ້ວຍຂໍ້ທີ່ຊົງຕອບນັ້ນ

ຂ້ານ້ອຍໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າເຖິງພົມທີ່ຍິ່ງ ພຣະຜູ້ມີພຣະພາກເຈົ້າກໍຊົງຕອບພົມທີ່ຍິ່ງ ຂໍ້ທີ່ຊົງຕອບນັ້ນຂ້ານ້ອຍພໍໃຈແລະຖືກໃຈຫຼາຍ ແລະ ຂ້ານ້ອຍກໍຊົມຊື່ນດ້ວຍຂໍ້ທີ່ຊົງຕອບນັ້ນ

ອັນໜຶ່ງ ຂ້ານ້ອຍໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າເຖິງຂໍ້ໃດ ໆ ພຣະຜູ້ມີພຣະພາກເຈົ້າກໍຊົງຕອບຂໍ້ນັ້ນ ໆ ຂໍ້ທີ່ຊົງຕອບນັ້ນ ຂ້ານ້ອຍພໍໃຈແລະຖືກໃຈຫຼາຍ ແລະ ຂ້ານ້ອຍກໍຊົມຊື່ນດ້ວຍຂໍ້ທີ່ຊົງຕອບນັ້ນ

ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າຈັ່ງຊັ້ນ ບັດນີ້ ຂ້ານ້ອຍຂໍທູນລາກັບ ຍ້ອນມີກິດ ມີໜ້າທີ່ທີ່ຈະຕ້ອງເຮັດອີກຫຼາຍ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມະຫາບໍພິດ ຂໍພຣະອົງຈົ່ງຊົງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນຊົງຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກ

ເຈົ້າຊີງລຸກຈາກທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈຶ່ງສະເດັດຈາກໄປ ດັ່ງນີ້ແລ

**ກັນນະກັດຖະລະສູດທີ່ ໑໐ ຈົບ**

**ຣາຊະວັກທີ່ ໔ ຈົບບໍລິບູນ**

## ລວມພຣະສູດທີ ມີໃນວັກນີ້ ຄື



# ໕. ພາມມະນະວັກ

**ໝວດວ່າດ້ວຍພາມ**

## ໑. ພຣົມມາຍຸສູດ

### ວ່າດ້ວຍພາມຊື່ພຣົມມາຍຸ

[໓໗໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນວິເທຫະ ພ້ອມກັບພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ສະໄໝນັ້ນແລ ພາມຊື່ພຣົມມາຍຸອາໄສຢູ່ໃນນະຄອນມິຖິລາ ເປັນຄົນຊະຣາ ເປັນຄົນແກ່ ເປັນຜູ້ໃຫຍ່ ລ່ວງການຜ່ານໄວມາໂດຍລຳດັບຈົນມີອາຍຸເຖິງ ໑໒໐ ປີນັບແຕ່ເກີດ ຮູ້ຈົບໄຕຣເພດ ພ້ອມທັງນິກຄັນທຸສາດ ເກຕຸພະສາດ ອັກສອນສາດ ແລະປະຫວັດສາດ ເຂົ້າໃຈໂຕບົດແລະໄວຍາກອນ ຊ່ຽວຊານໂລກາຍະຕະສາດ ແລະ ລັກສະນະມະຫາບຸຣຸດ ພົມມາຍຸພາມໄດ້ຟັງຂ່າວວ່າ

"ທ່ານຜູ້ຈະເລີນທັງຫລາຍ ໄດ້ຂ່າວວ່າ ພຣະສະມະນະໂຄດົມເປັນສາກະຍະບຸດສະເດັດ

ອອກບວດ ຈາກສາກະຍະຕະກູນ ສະເດັດຈາຣິກຢູ່ໃນແຄວ້ນວິເທຫະພ້ອມກັບພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ທ່ານພຣະໂຄດົມນັ້ນມີກິດຕິສັບອັນງາມຂ່າລືໄປແນວນີ້ວ່າ "ແມ່ນຍ້ອນເຫດນີ້ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫລາຍ ເປັນພຣະພຸດທະເຈົ້າເປັນພຣະຜູ້ມີພຣະພາກເຈົ້າ" ພຣະອົງຊົງຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດດ້ວຍພຣະອົງເອງແລ້ວຊົງປະກາດໃຫ້ຜູ້ອື່ນຮູ້ຕາມ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ຊົງປະກາດພົມຈັນຍ໌ບຣິອມທັງອັດຖະແລະພະຍັນຊະນະບໍລິສຸດ ບໍລິບູນຄົບຖ້ວນ ການໄດ້ພົບພຣະອະຣະຫັນທັງຫລາຍແນວນີ້ເປັນຄວາມດີຢ່າງແທ້ຈິງ"

[໓໗໔] ສະໄໝນັ້ນ ມານົບຊື່ອຸດຕະຣະເປັນສິດຂອງພົມມາຍຸພານ ຈົບໄຕຣເພດ ພ້ອມທັງນິກຄັນທຸສາດ ເກຕຸພະສາດ ອັກສອນສາດ ແລະປະຫວັດສາດ ເຂົ້າໃຈ ໂຕບົດແລະໄວຍາກອນ ຊ່ຽວຊານໂລກາຍະຕະສາດ ແລະ ລັກສະນະມະຫາບຸຣຸດ ເວລານັ້ນພົມມາຍຸພານຮຽກອຸດຕະຣະມານົບມາກ່າວວ່າ

"ທ້າວອຸດຕະຣະ ທ່ານພຣະສະມະນະໂຄດົມພຣະອົງນີ້ ເປັນສາກະຍະບຸດສະເດັດອອກບວດຈາກສາກະຍະຕະກູນ ສະເດັດຈາຣິກໄປໃນແຄວ້ນວິເທຫະ ພ້ອມກັບພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ທ່ານພຣະໂຄດົມນັ້ນມີກິດຕິສັບອັນງາມຂ່າລືໄປແນວນີ້ວ່າ "ແມ່ນຍ້ອນເຫດນີ້ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ຯລຯ ການໄດ້ພົບ ພຣະອະຣະຫັນທັງຫລາຍແນວນີ້ເປັນຄວາມດີຢ່າງແທ້ຈິງ ມາເທີ້ນ ທ້າວອຸດຕະຣະເຈົ້າຈົ່ງເຂົ້າໄປເຝົ້າ ທ່ານພຣະສະມະນະໂຄດົມຮອດບ່ອນຢູ່ແລ້ວ ຈົ່ງຮູ້ຈັກພຣະສະມະນະໂຄດົມໃຫ້ໄດ້ ພວກເຮົາຈະໄດ້ຮູ້ຈັກພຣະອົງວ່າ "ກິດຕິສັບຂອງທ່ານພຣະໂຄດົມທີ່ຂ່າລືໄປເຊັ່ນນັ້ນແມ່ນມີແທ້ບໍ? ທ່ານພຣະໂຄດົມ ຊົງເປັນເຊັ່ນນັ້ນແມ່ນແທ້ບໍ?"

ອຸດຕະຣະມານົບຮຽນຖາມວ່າ "ທ່ານຂ້ານ້ອຍ ເຮັດແນວໃດ ເຮົາຈຶ່ງຈະຮູ້ຈັກທ່ານພຣະໂຄດົມວ່າ "ກິດຕິສັບຂອງທ່ານພຣະໂຄດົມທີ່ຂ່າລືໄປເຊັ່ນນັ້ນແມ່ນມີແທ້ບໍ? ທ່ານພຣະໂຄດົມຊົງເປັນເຊັ່ນນັ້ນ ແມ່ນມີແທ້ບໍ?"

ພົມມາຍຸພານຕອບວ່າ "ທ້າວອຸດຕະຣະ ພຣະມະຫາບຸຣຸດຜູ້ປະກອບດ້ວຍລັກສະນະມະຫາບຸຣຸດ ໓໒ ປະການ ທີ່ຜາກົດໃນມົນຂອງເຮົາ ຍ່ອມມີຄະຕິ ໒ ແນວ ບໍ່ເປັນແນວອື່ນ ຄື

໑. ຖ້າຊົງຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດຜູ້ຊົງທຳ ີຄອງຣາດ ໂດຍທຳ ຊົງເປັນໃຫຍ່ໃນແຜ່ນດິນມີມະຫາສະມຸດທັງ ໔ ເປັນຂອບເຂດ ຊົງໄດ້ຮັບ

ໄຊຊະນະແລ້ວ ມີລາຊະອານາຈັກໝັ້ນຄົງ ສົມບູນດ້ວຍແກ້ວ (ຣັດຕະນະ) ໗ ປະການ ຄື (໑) ຈັກແກ້ວ (໒) ຊ້າງແກ້ວ (໓) ມ້າແກ້ວ (໔) ມະນີແກ້ວ (໕) ນາງແກ້ວ (໖) ຄະຫະບໍດີແກ້ວ (໗) ປະຣິນາຍົກແກ້ວ ມີພຣະຣາຊະໂອຣົດ ຫລາຍກວ່າ ໑,໐໐໐ ອົງເຊິ່ງລ້ວນແຕ່ກ້າຫານ ມີຮູບຊົງສົມເປັນວີຣະກະສັດ ສາມາດຍ່ຳຍີຣາຊະສັດຕູໄດ້ ພຣະອົງຊົງຊະນະໂດຍທຳ ບໍ່ຕ້ອງໃຊ້ອາດຍາຫຼື ອາວຸດ ຄອບຄອງແຜ່ນດິນນີ້ມີສາຄອນເປັນຂອບເຂດ

໒. ຖ້າສະເດັດອອກຈາກພະຣາດຊະວັງໄປບວດເປັນບັນພະຊິດ ຈະໄດ້ເປັນພຣະ ອະຣະຫັນຕະສຳມາສຳພຸດທະເຈົ້າ ຜູ້ບໍ່ມີກິເລດໃນໂລກ

ທ້າວອຸດຕະຣະ ເຮົາເປັນຜູ້ໃຫ້ມົນ ແຕ່ທ່ານເປັນຜູ້ຮັບມົນ"

[໓໗໕] ອຸດຕະຣະມານົບຮັບຄຳແລ້ວລຸກຈາກບ່ອນນັ່ງ ໄຫວ້ພົມມາຍຸພາມ ທຳປະທັກ ຂິນແລ້ວຫລີກຈາຣິກໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນແຄວ້ນວິເທຫະ ທ່ຽວຈາຣິກໄປ ໂດຍລຳດັບ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ພິຈາລະນາເບິ່ງລັກສະນະມະ ຫາບຸຣຸດ ໓໒ ປະການ ໃນພຣະວໍຣະກາຍຂອງພຣະຜູ້ມີພຣະພາກເຈົ້າ ກໍເຫັນລັກສະນະມະຫາບຸ ຣຸດ ໓໒ ປະການ ໂດຍຫຼາຍ ເວັ້ນຢູ່ ໒ ປະການ ຄື (໑) ພຣະຄຸຍຫະຖານອັນລີ້ຢູ່ໃນຝັກ (໒) ພຣະຊິວຫາໃຫຍ່ ຈຶ່ງຍັງມີຄວາມເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ແລະ ບໍ່ເຫຼື້ອມໃສໃນລັກສະ ນະມະຫາບຸຣຸດທັງ ໒ ປະການນີ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ມີພຣະດຳຣິວ່າ "ລັກສະນະ ໓໒ ປະການຂອງເຮົາ ອຸດຕະຣະມານົບນີ້ເຫັນໂດຍຫຼາຍເວັ້ນຢູ່ ໒ ປະການ ຄື (໑) ຄຸຍຫະຖານອັນເຊື່ອງຢູ່ໃນຝັກ (໒) ຊິວຫາໃຫຍ່ ຈຶ່ງຍັງມີຄວາມເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ແລະ ບໍ່ເຫຼື້ອມໃສລັກສະນະມະຫາ ບຸຣຸດທັງ ໒ ປະການນີ້"

ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຊົງບັນດານອິດທາພິສັງຂານໃຫ້ອຸດຕະຣະມານົບໄດ້ ເຫັນພຣະຄຸຍຫະຖານອັນເຊື່ອງຢູ່ໃນຝັກ ແລະ ຊົງແລບພຣະຊິວຫາສອດເຂົ້າໄປໃນຊ່ອງພຣະກັນ ທັງ ໒ ຂ້າງກັບໄປກັບມາ ຊົງສອດເຂົ້າໄປໃນຊ່ອງພຣະນາສິກທັງ ໒ ຂ້າງກັບໄປກັບມາ ຊົງແຜ່ ພຣະຊິວຫາອັດທົ່ວມົນທົນພຣະນະລາດ

ເວລານັ້ນ ອຸດຕະຣະມານົບໄດ້ມີຄວາມຄິດວ່າ "ພຣະສະມະນະໂຄດົມຊົງປະກອບດ້ວຍ ລັກສະນະ ມະຫາບຸຣຸດ ໓໒ ປະການ ທາງທີ່ດີ ເຮົາເພິ່ງຕິດຕາມພຣະສະມະນະໂຄດົມເບິ່ງພຣະ ອິລິຍາບົດຂອງພຣະອົງຕໍ່ໄປ" ຈາກນັ້ນອຸດຕະຣະມານົບໄດ້ຕິດຕາມພຣະຜູ້ມີພຣະພາກເຈົ້າຕະ

ຫຼອດ ໆ ເດືອນ ຄື ພຣະສາຢາ (ເງົາ) ຕິດຕາມພຣະອົງໄປສັນນັ້ນ

## ລັກສະນະມະຫາບຸຣຸດ ໓໒ ປະການ

[໓໗໖] ຄັ້ງນັ້ນ ເມື່ອລ່ວງໄປ ໆ ເດືອນ ອຸດຕະຣະມານົບໄດ້ຫລີກຈາຣິກໄປທາງນະຄອນມິຖິລາ ໃນແຄວ້ນວິເທຫະ ເມື່ອທ່ຽວຈາຣິກໄປຕາມລຳດັບ ໄດ້ເຂົ້າໄປຫາພົມມາຍຸພາມຮອດບ່ອນຢູ່ໃນນະຄອນມິຖິລາກຣາບແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພົມມາຍຸພາມຖາມອຸດຕະຣະມານົບວ່າ "ພໍ່ອຸດຕະຣະ ກິດຕິສັບຂອງທ່ານພຣະໂຄດົມທີ່ຊ່າລືໄປ ເປັນເຊັ່ນນັ້ນຈິງແທ້ ບໍ່ເປັນແນວອື່ນເລີຍແມ່ນບໍ? ທ່ານພຣະໂຄດົມຊົງເປັນເຊັ່ນນັ້ນຈິງແທ້ ບໍ່ເປັນແນວອື່ນເລີຍແມ່ນບໍ?"

ອຸດຕະຣະມານົບຕອບວ່າ "ທ່ານຂ້ານ້ອຍ ກິດຕິສັບຂອງທ່ານພຣະໂຄດົມທີ່ຊ່າລືໄປເປັນເຊັ່ນນັ້ນຈິງແທ້ ບໍ່ເປັນແນວອື່ນເລີຍ ທ່ານພຣະໂຄດົມຊົງເປັນເຊັ່ນນັ້ນຈິງແທ້ ບໍ່ເປັນແນວອື່ນເລີຍ ທັງຍັງຊົງປະກອບດ້ວຍລັກສະນະມະຫາບຸຣຸດ ໓໒ ປະການ

ຄື ທ່ານພຣະໂຄດົມ

໑. ມີຝາພຣະບາດຣາບພຽງສະເໝີກັນ ຂໍ້ທີ່ທ່ານພຣະໂຄດົມມີຝາພຣະບາດຣາບພຽງສະເໝີກັນນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໒. ພື້ນຝາພຣະບາດທັງສອງຂອງທ່ານພຣະໂຄດົມນີ້ ມີກົງຈັກເຊິ່ງມີກຳຂ້າງລະ ໑,໐໐໐ ຄົ້ວ ມີກົງ ມີດຸມ ແລະ ມີສ່ວນປະກອບຄົບທຸກແນວ ຂໍ້ທີ່ພື້ນຝາພຣະບາດທັງສອງຂອງທ່ານພຣະໂຄດົມນີ້ ມີກົງຈັກເຊິ່ງມີກຳຂ້າງລະ ໑,໐໐໐ ຄົ້ວມີກົງ ມີດຸມ ແລະ ມີສ່ວນປະກອບຄົບທຸກແນວນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໓. ມີສົ້ນພຣະບາດຍື່ນຍາວອອກໄປ ຂໍ້ທີ່ທ່ານພຣະໂຄດົມມີສົ້ນພຣະບາດຍື່ນຍາວ ອອກໄປນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໔. ມີພຣະອົງຄຸລີຍາວ ຂໍ້ທີ່ທ່ານພຣະໂຄດົມມີພຣະອົງຄຸລີຍາວນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໕. ມີພຣະຫັດແລະພຣະບາດອ່ອນນຸ່ມ ຂໍ້ທີ່ທ່ານພຣະໂຄດົມມີພຣະຫັດແລະພຣະບາດອ່ອນນຸ່ມນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໖. ຝາພຣະຫັດແລະຝາພຣະບາດມີເສັ້ນຂໍ້ທີ່ພຣະອົງຄຸລີຈອດຕິດກັນເປັນຮູບຕາໜ່າງ ຂໍ້ທີ່ທ່ານພຣະໂຄດົມມີຝາພຣະຫັດແລະຝາພຣະບາດມີເສັ້ນທີ່ຂໍ້ພຣະ

ອົງຄຸລີ ຈອດຕິດກັນເປັນຮູບຕາໜ່າງນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໗. ມີຂໍ້ພຣະບາດສູງ ຂໍ້ທີ່ທ່ານພຣະໂຄດົມມີຂໍ້ພຣະບາດສູງນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໘. ມີພຣະຊົງຄຽງຄືແຂ່ງຊີ້ນຊາຍ ຂໍ້ທີ່ທ່ານພຣະໂຄດົມມີພຣະຊົງຄຽງ ຄືແຂ່ງຊີ້ນຊາຍນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໙. ເມື່ອປະທັບຢືນບໍ່ຕ້ອງນ້ອມພຣະອົງລົງກໍຊົງລູບຄຳເຖິງພຣະຊານຸດ້ວຍຝາພຣະຫັດທັງສອງໄດ້ ຂໍ້ທີ່ທ່ານພຣະໂຄດົມເມື່ອປະທັບຢືນບໍ່ຕ້ອງນ້ອມພຣະອົງລົງກໍຊົງລູບເຖິງພຣະຊານຸດ້ວຍຝາພຣະຫັດທັງສອງໄດ້ນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໐. ມີພຣະຄຸຍຫະຖານອັນເຊື່ອງຢູ່ໃນຝັກ ຂໍ້ທີ່ທ່ານພຣະໂຄດົມມີພຣະຄຸຍຫະຖານອັນເຊື່ອງຢູ່ໃນຝັກນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໑. ມີພຣະສະຫວີສີຄຳ ມີພຣະສະຫວີພຸດຜ່ອງຄືຄຳ ຂໍ້ທີ່ທ່ານພຣະໂຄດົມມີພຣະສະຫວີສີຄຳ ມີພຣະສະຫວີພຸດຜ່ອງຄືຄຳນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໒. ມີພຣະສະຫວີລະອຽດຈົນລະອອງທຸລີບໍ່ອາດຕິດພຣະວໍຣະກາຍໄດ້ ຂໍ້ທີ່ທ່ານພຣະໂຄດົມມີພຣະສະຫວີລະອຽດຈົນລະອອງທຸລີບໍ່ອາດຕິດພຣະວໍຣະກາຍໄດ້ນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໓. ມີພຣະໂລມະຊາດດ່ຽວ ຄື ໃນແຕ່ລະຂຸມມີພຽງເສັ້ນດຽວ ຂໍ້ທີ່ທ່ານພຣະໂຄດົມມີພຣະໂລມະຊາດດ່ຽວ ຄື ໃນແຕ່ລະຂຸມມີພຽງເສັ້ນດຽວນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໔. ມີພຣະໂລມະຊາດປາຍງໍຂຶ້ນ ຄື ພຣະໂລມະຊາດຂອດເປັນວົງວຽນຂວາດັ່ງກຸນທົນສີຄາມເຂັ້ມດັ່ງດອກອັນຊັນ ຂໍ້ທີ່ທ່ານພຣະໂຄດົມມີພຣະໂລມະຊາດປາຍງໍຂຶ້ນ ຄື ພຣະໂລມະຊາດຂອດເປັນວົງວຽນຂວາດັ່ງກຸນທົນ ສີຄາມເຂັ້ມດັ່ງດອກອັນຊັນນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໕. ມີພຣະວໍຣະກາຍຕັ້ງກົງຄືກາຍພົມ ຂໍ້ທີ່ທ່ານພຣະໂຄດົມມີພຣະວໍຣະກາຍຕັ້ງ

ກົງຄືກາຍພົມນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໖. ມີພຣະມັງສະໃນບ່ອນ ៗ ແຫ່ງ ເຕັມບໍລິບູນ ຂໍ້ທີ່ທ່ານພຣະໂຄດົມມີພຣະມັງສະ ໃນບ່ອນ ៗ ແຫ່ງເຕັມບໍລິບູນນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໗. ມີພຣະວໍຣະກາຍທຸກສ່ວນບໍລິບູນ ຄື ລຳໂຕທ່ອນໜ້າຂອງຣາດຊະສີ ຂໍ້ທີ່ທ່ານພຣະໂຄດົມມີພຣະວໍຣະກາຍທຸກສ່ວນບໍລິບູນ ຄື ລຳໂຕທ່ອນໜ້າຂອງຣາດຊະສີນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໘. ມີຮ່ອງພຣະປຣິດສະດາງເຕັມສະເໝີກັນ ຂໍ້ທີ່ທ່ານພຣະໂຄດົມມີຮ່ອງພຣະປຣິດສະດາງເຕັມສະເໝີກັນນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໑໙. ມີພຣະວໍຣະກາຍເປັນປະຣິມົນທົນຄືປະຣິມົນທົນຂອງຕົ້ນໄຮ ພຣະວໍຣະກາຍສູງທໍ່ກັບ ໑ ວາຂອງພຣະອົງ ໑ ວາຂອງພຣະອົງທໍ່ກັບສ່ວນສູງພຣະວໍຣະກາຍ ຂໍ້ທີ່ທ່ານພຣະໂຄດົມມີພຣະວໍຣະກາຍເປັນປະຣິມົນທົນຄືປະຣິມົນທົນຂອງຕົ້ນໄຮ ພຣະວໍຣະກາຍສູງທໍ່ກັບ ໑ ວາຂອງພຣະອົງ ໑ ວາຂອງພຣະອົງທໍ່ກັບສ່ວນສູງພຣະວໍຣະກາຍນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໒໐. ມີລຳພຣະສອກລົມທໍ່ກັນຕະຫຼອດ ຂໍ້ທີ່ທ່ານພຣະໂຄດົມມີລຳພຣະສອກລົມທໍ່ກັນຕະຫຼອດນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໒໑. ມີເສັ້ນປະສາດຮັບຣົດພຣະກະຍາຫານໄດ້ດີ ຂໍ້ທີ່ທ່ານພຣະໂຄດົມມີເສັ້ນປະສາດຮັບຣົດພຣະກະຍາຫານໄດ້ດີນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາ-ບຸຣຸດນັ້ນ

໒໒. ມີພຣະຫະນຸ (ຄາງ) ຄືຄາງຣາດຊະສີ ຂໍ້ທີ່ທ່ານພຣະໂຄດົມມີພຣະຫະນຸຄືຄາງຣາດຊະສີນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໒໓. ມີພຣະທົນ (ແຂ້ວ) ໔໐ ຊີ່ ຂໍ້ທີ່ທ່ານພຣະໂຄດົມມີພຣະທົນ (ແຂ້ວ) ໔໐ ຊີ່ນີ້ ເປັນລັກສະນະ ມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໒໔. ມີພຣະທົນ (ແຂ້ວ) ຮາບພຽງສະເໝີກັນ ຂໍ້ທີ່ທ່ານພຣະໂຄດົມມີພຣະທົນ

(ແຂ້ວ) ຮາບພຽງສະເໝີກັນນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໒໕. ມີພຣະທົນ (ແຂ້ວ) ບໍ່ຫ່າງກັນ ຂໍ້ທີ່ທ່ານພຣະໂຄດົມມີພຣະທົນ (ແຂ້ວ) ບໍ່ຫ່າງກັນນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໒໖. ມີພຣະຂ້ຽວແກ້ວ (ແຂ້ວໝາກແງ) ຂາວງາມ ຂໍ້ທີ່ທ່ານພຣະໂຄດົມມີພຣະຂ້ຽວແກ້ວຂາວງາມນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໒໗. ມີພຣະຊິວຫາໃຫຍ່ຍາວ ຂໍ້ທີ່ທ່ານພຣະໂຄດົມມີພຣະຊິວຫາໃຫຍ່ຍາວນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໒໘. ມີພຣະສຸຣະສຽງຄືສຽງພົມ ຕັດຄືສຽງຮ້ອງຂອງນົກກາຣະເວກ ຂໍ້ທີ່ທ່ານພຣະໂຄດົມມີພຣະສຸຣະສຽງຄືສຽງພົມ ຕັດຄືສຽງຮ້ອງຂອງນົກກາຣະເວກນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໒໙. ມີພຣະເນດດຳປອດ ຂໍ້ທີ່ທ່ານພຣະໂຄດົມມີພຣະເນດດຳປອດນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໓໐. ມີດວງພຣະເນດແຈ່ມໃສຄືຕາງົວນ້ອຍເກີດໃໝ່ ຂໍ້ທີ່ທ່ານພຣະໂຄດົມມີ ດວງພຣະເນດແຈ່ມໃສຄືຕາງົວນ້ອຍເກີດໃໝ່ນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໓໑. ມີພຣະອຸນາໂລມະລະຫວ່າງພຣະຂະໂນງສີຂາວອ່ອນຄືປຸຍນຸ່ນ ຂໍ້ທີ່ທ່ານພຣະໂຄດົມມີພຣະອຸນາໂລມະລະຫວ່າງພຣະຂະໂນງສີຂາວອ່ອນຄືປຸຍນຸ່ນນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

໓໒. ມີພຣະສຽນຄືປະດັບດ້ວຍຂອບພຣະພັກ ຂໍ້ທີ່ທ່ານພຣະໂຄດົມມີ ພຣະສຽນຄືປະດັບດ້ວຍຂອບພຣະພັກນີ້ ເປັນລັກສະນະມະຫາບຸຣຸດຂອງມະຫາບຸຣຸດນັ້ນ

ທ່ານຜູ້ຈະເລີນ ທ່ານພຣະໂຄດົມພຣະອົງນັ້ນຊົງປະກອບດ້ວຍລັກສະນະມະຫາບຸຣຸດ ໓໒ ປະການຢ່າງນີ້ແລ

[໓໘໗] ທ່ານພຣະໂຄດົມພຣະອົງນັ້ນ

ເມື່ອຈະຊົງດຳເນີນ ຊົງກ້າວຢ່າງພຣະບາດເບື້ອງຂວາກ່ອນ ບໍ່ກ້າວຢ່າງພຣະບາດຍາວ

ເກີນໄປ ບໍ່ກ້າວຍ່າງພຣະບາດສັ້ນເກີນໄປ ບໍ່ຊົງດຳເນີນໄວເກີນໄປ ບໍ່ຊົງດຳເນີນຊ້ານເກີນໄປ ຂະນະຊົງດຳເນີນ ພຣະຊານຸ (ເຂົ່າ) ກັບພຣະຊານຸບໍ່ສຽດສີກັນ ຂໍ້ພຣະບາດກັບຂໍ້ພຣະບາດບໍ່ກະທົບກັນ ບໍ່ຊົງຍົກພຣະອຸຣຸ (ຂາ) ສູງ ບໍ່ຊົງຢຽດຂາໄປຂ້າງຫລັງ ບໍ່ຊົງ ກະທົບພຣະອຸຣຸ ບໍ່ຊົງສ່າຍພຣະອຸຣຸ

ເມື່ອຊົງດຳເນີນພຣະວໍຣະກາຍສ່ວນເທິງໄຫວ ຊົງດຳເນີນບໍ່ໃຊ້ກຳລັງຫຼາຍ ເມື່ອທອດພຣະເນດ ຊົງຫລຽວເບິ່ງໄປທັງພຣະວໍຣະກາຍ ບໍ່ຊົງແຫງນເບິ່ງ ບໍ່ຊົງກົ້ມເບິ່ງ ຂະນະຊົງດຳເນີນບໍ່ສ່າຍພຣະເນດ ຊົງທອດພຣະເນດປະມານຊົ່ວແອກ ຍິ່ງກວ່ານັ້ນພຣະອົງຊົງມີພຣະຍານທັດສະນະ ບໍ່ມີອັນໃດຂວາງກັ້ນໄດ້

ເມື່ອສະເດັດເຂົ້າສູ່ບໍລິເວນເຮືອນ ບໍ່ຊົງຢືດພຣະວໍຣະກາຍ ບໍ່ຊົງຫຍໍ້ພຣະວໍຣະກາຍ ບໍ່ຊົງຫໍ່ພຣະວໍຣະກາຍ ບໍ່ຊົງສ່າຍພຣະວໍຣະກາຍ ສະເດັດເຂົ້າປະທັບນັ່ງເທິງພຸດທະອາດ ບໍ່ໄກເກີນໄປບໍ່ໃກ້ເກີນໄປ ບໍ່ປະທັບນັ່ງທ້າວພຣະຫັດເທິງພຸດທະອາດ ບໍ່ຊົງພິງພຣະວໍຣະກາຍທີ່ພຸດທະອາດ

ເມື່ອປະທັບນັ່ງໃນບໍລິເວນເຮືອນ ບໍ່ຊົງຄະນອງພຣະຫັດ ບໍ່ຊົງຄະນອງພຣະບາດ ບໍ່ປະທັບນັ່ງຊັນພຣະຊານຸ ບໍ່ປະທັບນັ່ງຊ້ອນພຣະບາດ ບໍ່ປະທັບນັ່ງເອົາຝາພຣະຫັດ ຍັນພຣະນຸ (ຄໍ້າຄາງ) ເມື່ອປະທັບນັ່ງໃນບໍລິເວນເຮືອນ ບໍ່ຊົງເກງກົວ ບໍ່ຊົງຫວັ່ນໄຫວ ບໍ່ຊົງຢ້ານ ບໍ່ຊົງສະດຸ້ງຊົງປາສະຈາກໂລມະຊາດຊູຊັນ ຊົງພໍພຣະທະໄທໃນວິເວກ

ເມື່ອຊົງຮັບນໍ້າລ້າງບາດ ບໍ່ຊົງຊູບາດຂຶ້ນຮັບ ບໍ່ຊົງລຸດບາດລົງຮັບ ບໍ່ຊົງ ຍື່ນບາດຖ້າຮັບບໍ່ຊົງແກວ່ງບາດຖ້າຮັບ ຊົງຮັບນໍ້າລ້າງບາດບໍ່ໜ້ອຍປານໃດບໍ່ຫຼາຍປານໃດ ບໍ່ຊົງລ້າງບາດດັງຂລຸກ ໆ ບໍ່ຊົງລ້າງບາດດ້ວຍວິທີໝຸນ ບໍ່ຊົງວາງບາດທີ່ພື້ນ ຊົງລ້າງເທິງພຣະຫັດ

ເມື່ອຊົງລ້າງພຣະຫັດກໍເປັນອັນຊົງລ້າງບາດ ເມື່ອຊົງລ້າງບາດກໍເປັນອັນຊົງລ້າງພຣະຫັດຊົງຖອກນໍ້າລ້າງບາດບໍ່ໄກເກີນໄປ ບໍ່ໃກ້ເກີນໄປ ແລະ ຊົງຖອກນໍ້າລ້າງບາດບໍ່ໃຫ້ ນໍ້າກະເຊັນ

ເມື່ອຊົງຮັບເຂົ້າສຸກກໍບໍ່ຊົງຊູບາດຂຶ້ນຮັບ ບໍ່ຊົງລຸດບາດລົງຮັບ ບໍ່ຊົງຍື່ນ ບາດຖ້າຮັບ ບໍ່ຊົງແກວ່ງບາດຖ້າຮັບ ຊົງຮັບເຂົ້າສຸກບໍ່ໜ້ອຍປານໃດບໍ່ຫຼາຍປານໃດ ຊົງຮັບກັບເຂົ້າ ສະເຫວີຍພຣະກະຍາຫານພໍປະມານກັບເຂົ້າ ບໍ່ຊົງເຮັດກັບເຂົ້າໃຫ້ເກີນກວ່າຄຳເຂົ້າ ຊົງຫຍໍ້າຄຳເຂົ້າຂ້າງໃນປາກສອງສາມະຄັ້ງແລ້ວຊົງກືນ ເຂົ້າຍັງບໍ່ລະອຽດ ບໍ່ຊົງກືນລົງໄປ ບໍ່ມີເຂົ້າເຫຼືອຢູ່ໃນປາກຈຶ່ງນ້ອມຄຳເຂົ້າອີກຄຳໜຶ່ງເຂົ້າໄປ ຊົງມີປົກກະຕິກຳນົດຣົດອາຫານແລ້ວສະເຫວີຍອາຫານ ແຕ່ບໍ່ຊົງຕິດໃນຣົດຊາດ

ທ່ານພຣະໂຄດົມພຣະອົງນັ້ນສະເຫວີຍພຣະກະຍາຫານປະກອບດ້ວຍອົງ ໘ ປະການ ຄື

໑. ບໍ່ສະເຫວີຍເພື່ອຫລິ້ນ
໒. ບໍ່ສະເຫວີຍເພື່ອມົວເມົາ
໓. ບໍ່ສະເຫວີຍເພື່ອປະດັບ
໔. ບໍ່ສະເຫວີຍເພື່ອຕົກແຕ່ງ
໕. ສະເຫວີຍເພື່ອດຳລົງພຣະວໍຣະກາຍນີ້ໄວ້
໖. ສະເຫວີຍເພື່ອຍັງພະຊົນໃຫ້ເປັນໄປໄດ້
໗. ສະເຫວີຍເພື່ອປ້ອງກັນຄວາມລຳບາກ
໘. ສະເຫວີຍເພື່ອຊົງອະນຸເຄາະພົມມະຈັນ

ດ້ວຍຊົງພຣະດຳຣິວ່າ "ພຽງທີ່ນີ້ກໍຈັກກຳຈັດເວທະນາເກົ່າ ຈັກບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ຮ່າງກາຍຂອງເຮົາຈັກດຳເນີນໄປສະດວກ ບໍ່ມີໂທດ ແລະ ຢູ່ສຸກສະບາຍ" ທ່ານພຣະໂຄດົມພຣະອົງນັ້ນ ສະເຫວີຍພຣະກະຍາຫານສຳເລັດແລ້ວ ເມື່ອຈະຊົງຮັບນ້ຳລ້າງບາດບໍ່ຊົງຊູບາດຂຶ້ນຮັບ ບໍ່ຊົງ ລຸດບາດລົງຮັບ ບໍ່ຊົງຍື່ນບາດຖ້າຮັບ ບໍ່ຊົງແກວ່ງບາດຮັບ ຊົງຮັບນ້ຳລ້າງບາດ ບໍ່ໜ້ອຍປານໃດ ບໍ່ຫຼາຍປານໃດ ບໍ່ຊົງລ້າງບາດດັງຂລຸກ ໆ ບໍ່ຊົງລ້າງບາດດ້ວຍວິທີໝຸນ ບໍ່ຊົງວາງບາດທີ່ພື້ນ ຊົງລ້າງເທິງພຣະຫັດ ເມື່ອຊົງລ້າງພຣະຫັດກໍເປັນອັນຊົງລ້າງບາດ ເມື່ອຊົງລ້າງບາດກໍເປັນອັນຊົງລ້າງພຣະຫັດ ຊົງຖອກນ້ຳລ້າງບາດບໍ່ໄກເກີນໄປ ບໍ່ໃກ້ເກີນໄປ ຊົງຖອກນ້ຳລ້າງບາດບໍ່ໃຫ້ນ້ຳກະເຊັນ ສະເຫວີຍພຣະກະຍາຫານສຳເລັດແລ້ວ ບໍ່ຊົງວາງບາດທີ່ພື້ນ ຊົງວາງໄວ້ໃນບ່ອນບໍ່ໄກເກີນໄປ ບໍ່ໃກ້ເກີນໄປ ຈະບໍ່ຊົງຕ້ອງການບາດກໍເປັນໄປບໍ່ໄດ້ ຈະຕາມຖືຮັກສາບາດຕະຫຼອດກໍເປັນໄປບໍ່ໄດ້ ສະເຫວີຍສຳເລັດແລ້ວ ປະທັບນິ່ງເສີຍຢູ່ບຶດໜຶ່ງ ແຕ່ບໍ່ຊົງປ່ອຍເວລາອະນຸໂມທະນາໃຫ້ລ່ວງໄປ ສະເຫວີຍສຳເລັດແລ້ວກໍຊົງອະນຸໂມທະນາ ບໍ່ຊົງຕິຕຽນ ພັດຣນັ້ນ ບໍ່ຊົງມຸ້ງຫວັງພັດຣອື່ນ ຊົງຊີ້ແຈ່ງໃຫ້ບໍລິສັດເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ

ພຣະອົງສະເດັດລຸກຈາກພຸດທະອາດສະເດັດໄປ ກໍບໍ່ສະເດັດໄວເກີນໄປ ບໍ່ສະເດັດຊ້ານເກີນໄປ ບໍ່ຮີບຟ້າວສະເດັດໄປ ບໍ່ຊົງຈີວອນສູງເກີນໄປ ບໍ່ຊົງຈີວອນຕ່ຳເກີນໄປ ບໍ່ຊົງຈີວອນແໜ້ນຕິດ ພຣະວໍຣະກາຍເກີນໄປ ແລະ ບໍ່ຊົງຈີວອນໂລະເລະຈາກພຣະວໍຣະກາຍ ຊົງຈີວອນບໍ່ໃຫ້ລົມພັດພືໄດ້ ທັງຝຸ່ນລະອອງບໍ່ຕິດພຣະວໍຣະກາຍ ສະເດັດເຖິງພຣະອາຮາມແລ້ວປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ຈຶ່ງຊົງລ້າງພຣະບາດ ບໍ່ຊົງໃສ່ພຣະທະໄທເພື່ອປະດັບຕົກແຕ່ງພຣະບາດຢູ່ ຊົງລ້າງພຣະບາດ ແລ້ວປະທັບນັ່ງຄູ້ບັນລັງ ຕັ້ງພຣະວໍຣະກາຍກົງດຳລົງພຣະສະຕິໄວ້ເບື້ອງພຣະພັກ ບໍ່ຊົງດຳຣິ ເພື່ອບຽດບຽນພຣະອົງ ບໍ່ຊົງດຳຣິເພື່ອບຽດບຽນຜູ້ອື່ນ ບໍ່ຊົງດຳຣິເພື່ອບຽດບຽນທັງສອງຝ່າຍ ປະທັບນັ່ງຊົງດຳຣິແຕ່ສິ່ງທີ່ເປັນປະໂຫຍດແກ່ພຣະອົງ ສິ່ງທີ່ເປັນປະໂຫຍດແກ່ຜູ້ອື່ນ ສິ່ງທີ່ເປັນປະໂຫຍດທັງສອງຝ່າຍ ແລະ ສິ່ງທີ່ເປັນປະໂຫຍດແກ່ໂລກທັງປວງທີ່

ນັ້ນ ປະທັບຢູ່ໃນອາຣາມ ກໍຊົງສະແດງທຳໃນບໍລິສັດ ບໍ່ຊົງຍ້ອງຍໍບໍລິສັດ ບໍ່ຊົງຮຸກຮານບໍລິສັດ ໂດຍແທ້ທີ່ຈິງ ຊົງຊີ້ແຈ່ງໃຫ້ບໍລິສັດເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮໍາໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ

ທ່ານພຣະໂຄດົມພຣະອົງນັ້ນ ຊົງມີພຣະສຸຣະສຽງກຶກກ້ອງເປ່ງອອກຈາກປາກປະກອບດ້ວຍອົງ ໘ ປະການ ຄື

| | |
|---|---|
| ໑. ນຸ້ມນວລ | ໕. ຟັງຊັດເຈນ |
| ໒. ມ່ວນ | ໖. ຟັງງ່າຍ |
| ໓. ກົມກລ່ອມ | ໗. ບໍ່ມົວ |
| ໔. ລຸ້ມລຶກ | ໘. ມີກັງວານ |

ພຣະສຸຣະສຽງທີ່ພຣະອົງຊົງສອນບໍລິສັດ ໃຫ້ເຂົ້າໃຈບໍ່ໄດ້ກ້ອງອອກໄປນອກບໍລິສັດນັ້ນ ຊົນທັງຫລາຍທີ່ທ່ານພຣະໂຄດົມຊົງຊີ້ແຈ່ງໃຫ້ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮໍາໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ຈຶ່ງລຸກຈາກທີ່ນັ່ງຈາກໄປ ແຕ່ກ່ອນຈາກໄປຕ້ອງໄດ້ຫັນມາຫລຽວເບິ່ງໂດຍບໍ່ຍາກຈາກໄປ ຕ່າງລຳພຶງວ່າ "ເຮົາໄດ້ເຫັນທ່ານພຣະໂຄດົມພຣະອົງນັ້ນຊົງດຳເນີນ ປະທັບຢືນ ສະເດັດເຂົ້າບໍລິເວນເຮືອນ ປະທັບນັ່ງນິ່ງໃນບໍລິເວນເຮືອນ ກຳລັງສະເຫວີຍພຣະກະຍາຫານໃນບໍລິເວນເຮືອນ ສະເຫວີຍສຳເລັດແລ້ວກໍປະທັບນັ່ງນິ່ງ ສະເຫວີຍສຳເລັດແລ້ວ ຊົງອະນຸໂມທະນາ ສະເດັດກັບມາຍັງພຣະອາຣາມ ສະເດັດມາເຖິງພຣະອາຣາມແລ້ວປະທັບນິ່ງຢູ່ ປະທັບຢູ່ໃນພຣະອາຣາມແລ້ວ ຊົງສະແດງທຳໃນບໍລິສັດ ທ່ານພຣະໂຄດົມພຣະອົງນັ້ນ ຊົງພຣະຄຸນແນວນີ້ ໆ ແລະ ຊົງພຣະຄຸນຍິ່ງກວ່າທີ່ກ່າວແລ້ວນັ້ນ"

[໒໘໘] ເມື່ອອຸດຕະຣະມານົບກ່າວແນວນີ້ແລ້ວ ພົມມາຍຸພາມລຸກຈາກບ່ອນນັ່ງ ຫົ່ມຜ້າບ່ຽງບ່າ ປະນົມມືໄປທາງທິດທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ແລ້ວເປ່ງອຸທານ ຂຶ້ນ ໓ ຄັ້ງວ່າ

"ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ

ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ

ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ"

ແລ້ວຄິດວ່າ "ເຮັດແນວໃດນໍ ເຮົາຈຶ່ງຈະໄດ້ພົບທ່ານພຣະໂຄດົມພຣະອົງນັ້ນຈັກເທື່ອໜຶ່ງ ເຮັດແນວໃດ ເຮົາຈຶ່ງຈະໄດ້ສົນທະນາປາໄສ (ກັບທ່ານພຣະໂຄດົມ) ແດ່"

[໓໘໙] ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າເມື່ອສະເດັດຈາຣິກໄປໃນແຄວັນວິເທຫະໂດຍລຳດັບ ສະເດັດເຖິງນະຄອນມິຖິລາ ໄດ້ຮູ້ວ່າ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ສວນໝາກມ່ວງຂອງພຣະເຈົ້າມະຄະເທວະ ເຂດນະຄອນມິຖິລາ ພາມແລະຄະຫະບໍດີຊາວນະຄອນມິຖິລາໄດ້ສະດັບຂ່າວວ່າ

"ໄດ້ຂ່າວວ່າ ພຣະສະມະນະໂຄດົມເປັນສາກະຍະບຸດ ຊົງບວດຈາກສາກະຍະຕະກູນ ສະເດັດຈາຣິກ ໄປໃນແຄວັນວິເທຫະພ້ອມກັບພິກຂຸສົງໝູ່ໃຫຍ່ປະມານ ໕໐໐ ອົງ ສະເດັດເຖິງນະຄອນມິຖິລາແລ້ວ ປະທັບຢູ່ທີ່ສວນໝາກມ່ວງຂອງພຣະເຈົ້າມະຄະເທວະ ເຂດນະຄອນມິຖິລາ ທ່ານພຣະໂຄດົມ ພຣະອົງນັ້ນມີກິດຕິສັບອັນງາມຊ່າລືໄປແນວນີ້ວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະໃນສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາ ຂອງເທວະດາແລະມະນຸດທັງຫລາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ພຣະອົງຊົງ ຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດດ້ວຍພຣະອົງເອງແລ້ວຊົງປະກາດໃຫ້ຜູ້ອື່ນຮູ້ຕາມ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ຊົງປະກາດພົມມະຈັນພ້ອມທັງອັດຖະ ແລະ ພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນ ການໄດ້ພົບພຣະອະຣະຫັນທັງຫລາຍແນວນີ້ ເປັນຄວາມດີຢ່າງແທ້ຈິງ"

ຄັ້ງນັ້ນ ພາມແລະຄະຫະບໍດີຊາວນະຄອນມິຖິລາພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ລາງພວກຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກ ທູນສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກປະນົມມືໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບນັ່ງແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ລາງພວກປະກາດຊື່ ແລະ ໂຄດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກກໍນັ່ງນິ່ງຢູ່ທີ່ທີ່ສົມຄວນ

## ພົມມາຍຸພາມເຂົ້າເຝົ້າພຣະພຸດທະເຈົ້າ

[໓໙໐] ພົມມາຍຸພາມໄດ້ສະດັບຂ່າວວ່າ "ໄດ້ຂ່າວວ່າ ພຣະສະມະນະໂຄດົມ ເປັນສາກະຍະບຸດ ຊົງບວດຈາກສາກະຍະຕະກູນ ສະເດັດເຖິງນະຄອນມິຖິລາແລ້ວປະທັບຢູ່ທີ່ສວນໝາກມ່ວງຂອງພຣະເຈົ້າມະຄະເທວະ ເຂດນະຄອນມິຖິລາ" ຄັ້ງນັ້ນແລ ພົມມາຍຸພາມ ພ້ອມດ້ວຍມານົບເປັນຈຳນວນຫລາຍ ພາກັນເຂົ້າໄປສູ່ສວນໝາກມ່ວງຂອງພຣະເຈົ້າມະຄະເທວະ ລຳດັບນັ້ນໃນບ່ອນບໍ່ໄກຈາກສວນໝາກມ່ວງຂອງພຣະເຈົ້າມະຄະເທວະ ພົມມາຍຸພາມໄດ້ ຄິດວ່າ "ການທີ່ເຮົາບໍ່ນັດໝາຍໃຫ້ຊົງຮູ້ກ່ອນແລ້ວເຂົ້າໄປເຝົ້າພຣະສະມະນະໂຄດົມບໍ່ຄວນແກ່ເຮົາເລີຍ"

ລຳດັບນັ້ນ ພົມມາຍຸພາມຮຽກມານົບຄົນໜຶ່ງມາສັ່ງວ່າ "ມາເທີ້ນ ພໍ່ມານົບ ພໍ່ຈົ່ງເຂົ້າໄປເຝົ້າພຣະສະມະນະໂຄດົມຮອດບ່ອນຢູ່ ແລ້ວຈົ່ງທູນຖາມພຣະສະມະນະໂຄດົມເຖິງພຣະສຸກພາບ ຄວາມມີພຣະໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ ຕາມຄຳຂອງເຮົາວ່າ "ຂ້າແດ່ທ່ານພຣະໂຄດົມ ພົມມາຍຸພາມທູນຖາມທ່ານພຣະໂຄດົມ ເຖິງຄວາມມີພຣະສຸກພາບ ຄວາມມີພຣະໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ" ແລະຈົ່ງຂາບທູນແນວນີ້ວ່າ "ຂ້າແດ່ທ່ານພຣະໂຄດົມ ພຣົມມາຍຸ-ພາມເປັນຄົນຊະຣາ ເປັນຄົນແກ່ ເປັນຜູ້ໃຫຍ່ ລ່ວງການຜ່ານໄວມາໂດຍລຳດັບ ຈົນມີອາຍຸ ໑໒໐ ປີ ນັບແຕ່ເກີດ ຈົບໄຕຣເພດ ພ້ອມທັງນິກຄັນທຸສາດ ເກຕຸພະສາດ ອັກສອນສາດ ແລະປະຫວັດສາດ ເຂົ້າໃຈໂຕບົດແລະໄວຍາກອນ ຊ່ຽວຊານໂລກາຍະຕະສາດ ແລະລັກສະນະມະຫາບຸຣຸດ ຂ້າແດ່ ທ່ານພຣະໂຄດົມ ພາມແລະຄະຫະບໍດີມີປະມານທໍ່ໃດ ຢູ່ອາໄສໃນນະຄອນມິຖິລາ ພົມມາຍຸພາມປາກົດວ່າເປັນຜູ້ເລີດກວ່າພາມ ແລະ ຄະຫະບໍດີເຫຼົ່ານັ້ນ ຍ້ອນໂພຄະ ມົນ ອາຍຸ ແລະ ຍົດ ທ່ານປາຖະໜາທີ່ຈະເຂົ້າເຝົ້າທ່ານພຣະໂຄດົມ"

ມານົບນັ້ນຮັບຄຳພົມມາຍຸພາມແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ໄດ້ຢືນຢູ່ທີ່ທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ທ່ານພຣະໂຄດົມ ພົມມາຍຸພາມທູນຖາມທ່ານພຣະໂຄດົມເຖິງພຣະສຸກພາບ ຄວາມມີພຣະໂຣຄາພາດໜ້ອຍ ເບົາຕົນໂຕ ມີພຣະພະລານາໄມສົມບູນ ຢູ່ສຸກສະບາຍ ແລະຝາກຂາບທູນແນວນີ້ວ່າ "ຂ້າແດ່ ທ່ານພຣະໂຄດົມ ພົມມາຍຸພາມເປັນຄົນຊະຣາ ເປັນ ຄົນແກ່ ເປັນຜູ້ໃຫຍ່ ລ່ວງການຜ່ານໄວມາໂດຍລຳດັບ ຈົນມີອາຍຸ ໑໒໐ ປີ ນັບແຕ່ເກີດ ຈົບໄຕຣເພດ ພ້ອມທັງນິກຄັນທຸສາດ ເກຕຸພະສາດ ອັກສອນສາດ ແລະ ປະຫວັດສາດ ເຂົ້າໃຈໂຕບົດແລະໄວຍາກອນ ຊ່ຽວຊານໂລກາຍະຕະສາດ ແລະ ລັກສະນະມະຫາບຸຣຸດ ຂ້າແດ່ ທ່ານພຣະໂຄດົມ ພາມແລະຄະຫະບໍດີມີປະມານທໍ່ໃດ ຢູ່ອາໄສໃນນະຄອນມິຖິລາ ພຣົມມາຍຸພາມປາກົດວ່າ ເປັນຜູ້ເລີດກວ່າພາມ ແລະ ຄະຫະບໍດີເຫຼົ່ານັ້ນ ຍ້ອນໂພຄະ ມົນ ອາຍຸ ແລະ ຍົດ ທ່ານປາຖະໜາຈະເຂົ້າເຝົ້າທ່ານພຣະໂຄດົມ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມານົບ ພົມມາຍຸພາມ ຈົ່ງກຳນົດເວລາທີ່ສົມຄວນໃນບັດນີ້ເທີ້ນ"

ຫລັງຈາກນັ້ນ ມານົບນັ້ນຈຶ່ງເຂົ້າໄປຫາພົມມາຍຸພາມຮອດບ່ອນຢູ່ແລ້ວ ໄດ້ກ່າວກັບພົມມາຍຸພາມວ່າ "ທ່ານເປັນຜູ້ທີ່ທ່ານພຣະສະມະນະໂຄດົມຊົງປະທານໂອກາດແລ້ວ ຈົ່ງໄປໃນເວລາທີ່ເຫັນສົມຄວນເທີ້ນ"

## ພົມມາຍຸພານຂໍເບິ່ງພຣະຊິວຫາແລະພຣະຄຸຍຫະຖານ

[໓໙໑] ຄັ້ງນັ້ນແລ ພົມມາຍຸພານເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ບໍລິສັດນັ້ນໄດ້ເຫັນພົມມາຍຸພານມາແຕ່ໄກ ຈຶ່ງຟ້າວລຸກຂຶ້ນໃຫ້ໂອກາດຕາມສົມຄວນແກ່ເຂົາ ປຽບຄືລຸກຂຶ້ນໃຫ້ໂອກາດແກ່ຜູ້ມີຊື່ສຽງ ມີຍົດ ລຳດັບນັ້ນ ພຣົມມາຍຸໄພານໄດ້ກ່າວກັບບໍລິສັດນັ້ນວ່າ "ຢ່າເລີຍ ທ່ານຜູ້ຈະເລີນທັງຫລາຍ ເຊີນທ່ານທັງຫລາຍນັ່ງເທິງອາສະນະຂອງຕົນເອງເທີ້ນ ເຮົາຈັກນັ່ງໃກ້ ໆ ພຣະສະມະນະໂຄດົມນີ້"

ຄັ້ງນັ້ນ ພົມມາຍຸພານໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ພິຈາລະນາເບິ່ງລັກສະນະມະຫາບຸຣຸດ ໓໒ ປະການໃນພຣະວໍຣະກາຍຂອງພຣະຜູ້ມີພຣະພາກເຈົ້າ ໄດ້ເຫັນໂດຍຫຼາຍ ເວັ້ນຢູ່ ໒ ປະການ ຄື (໑) ພຣະຄຸຍຫະຖານອັນເຊື່ອງຢູ່ໃນຝັກ (໒) ພຣະຊິວຫາໃຫຍ່ ຈຶ່ງຍັງເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນລັກສະນະມະຫາບຸຣຸດອີກ ໒ ປະການ ຕໍ່ຈາກນັ້ນ ພົມມາຍຸພານໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດ້ວຍຄາຖາວ່າ

"ຂ້າແດ່ ທ່ານພຣະໂຄດົມ ລັກສະນະມະຫາບຸຣຸດ
ທີ່ຂ້າພຣະອົງໄດ້ສະດັບມາວ່າມີ ໓໒ ປະການ
ແຕ່ຍັງບໍ່ເຫັນຢູ່ ໒ ປະການໃນພຣະວໍຣະກາຍຂອງພຣະອົງ
ຂ້າແດ່ ພຣະອົງຜູ້ສູງສຸດກວ່ານໍຣະຊົນ
ພຣະຄຸຍຫະຖານຂອງພຣະອົງລີ້ຢູ່ໃນຝັກ
ທີ່ຜູ້ຮູ້ກ່າວກັນວ່າຄ້າຍຂອງນາຣີບໍ?
ພຣະຊິວຫາຂອງພຣະອົງໄດ້ນະຣະລັກສະນະບໍ?
ພຣະອົງມີພຣະຊິວຫາໃຫຍ່ບໍ?
ຂ້າພຣະອົງຈະເພິ່ງຮູ້ຄວາມຂໍ້ນັ້ນໄດ້ແນວໃດ
ຂໍພຣະອົງຊົງຄ່ອຍ ໆ ນຳພຣະລັກສະນະນັ້ນອອກມາເທີ້ນ
ຂໍໄດ້ໂຜດກຳຈັດຄວາມສົງໄສຂອງຂ້າພຣະອົງດ້ວຍເທີ້ນ ທ່ານລືສີ
ຖ້າພຣະອົງຊົງປະທານໂອກາດ
ຂ້າພຣະອົງຈະຂໍທູນຖາມບັນຫາ
ທີ່ຂ້າພຣະອົງປາຖະໜາບາງຢ່າງ
ເພື່ອປະໂຫຍດເກື້ອກູນໃນປັດຈຸບັນ
ແລະເພື່ອຄວາມສຸກໃນສຳປະຣາຍະພົບ"

[໓໙໒] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຊົງດຳຣິວ່າ "ພົມມາຍຸພານນີ້ເຫັນລັກສະນະມະ

ຫາບຸຣຸດ ໓໒ ປະການຂອງເຮົາໂດຍຫຼາຍ ເວັ້ນຢູ່ ໒ ປະການ ຄື (໑) ຄຸຍຫະຖານ ອັນລີ້ຢູ່ໃນຝັກ (໒) ຊິວຫາໃຫຍ່ ຈຶ່ງຍັງເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນລັກສະນະມະຫາບຸຣຸດອີກ ໒ ປະການ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຊົງບັນດານອິດທາພິສັງຂານໃຫ້ພົມມາຍຸພາມໄດ້ເຫັນພຣະຄຸຍຫະຖານອັນເຊື່ອງຢູ່ໃນຝັກ ແລະຊົງແລບພຣະຊິວຫາ ສອດເຂົ້າໃນຊ່ອງພຣະກັນທັງ ໒ ຂ້າງກັບໄປກັບມາ ຊົງສອດເຂົ້າໃນຊ່ອງພຣະນາສິກທັງ ໒ ຂ້າງກັບໄປກັບມາ ຊົງແຜ່ພຣະຊິວຫາອັດທົ່ວມົນທົນພຣະນະລາດ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບ ພົມມາຍຸພາມດ້ວຍພຣະຄາຖາວ່າ

"ພາມ ລັກສະນະມຫາບຣຸດ
ທີ່ທ່ານໄດ້ສະດັບມາວ່າມີ ໓໒ ປະການນັ້ນ
ມີຢູ່ໃນກາຍຂອງເຮົາຄົບທຸກແນວ ທ່ານຢ່າສົງໄສ
ພາມ ສິ່ງທີ່ຄວນຮູ້ເຮົາໄດ້ຮູ້ຍິ່ງແລ້ວ
ສິ່ງທີ່ຄວນຈະເລີນເຮົາໄດ້ຈະເລີນແລ້ວ
ແລະສິ່ງທີ່ຄວນລະເຮົາກໍລະໄດ້ແລ້ວ
ຍ້ອນເຫດນັ້ນ ເຮົາຈຶ່ງເປັນພຸດທະ
ທ່ານໄດ້ຮັບໂອກາດແລ້ວ ຈົ່ງຖາມບັນຫາບາງຢ່າງ
ທີ່ທ່ານປາຖະໜາເທີ້ນ
ເພື່ອປະໂຫຍດເກື້ອກູນໃນປັດຈຸບັນ
ແລະເພື່ອຄວາມສຸກໃນສຳປະຣາຍະພົບ"

[໓໙໓] ຄັ້ງນັ້ນແລ ພົມມາຍຸພາມໄດ້ຄິດວ່າ"ເຮົາເປັນຜູ້ທີ່ພຣະສະມະນະໂຄດົມປະທານໂອກາດແລ້ວ ຈະທູນຖາມເຖິງປະໂຫຍດໃນປັດຈຸບັນຫຼືປະໂຫຍດໃນສຳປະຣາຍະພົບ" ລຳດັບນັ້ນ ພົມມາຍຸພາມໄດ້ຄິດວ່າ "ເຮົາສະຫຼາດປະໂຫຍດໃນປັດຈຸບັນ ແມ່ນຄົນເຫຼົ່າອື່ນ ກໍຖາມເຮົາເຖິງປະໂຫຍດໃນປັດຈຸບັນ ທາງທີ່ດີ ເຮົາຄວນທູນຖາມປະໂຫຍດໃນສຳປະຣາຍະພົບ ກັບພຣະສະມະນະໂຄດົມເທີ້ນ"

ຕໍ່ຈາກນັ້ນ ພົມມາຍຸພາມໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ດ້ວຍຄາຖາວ່າ

"ຂ້າແດ່ພຣະອົງຜູ້ຈະເລີນ
ບຸກຄົນເປັນພາມໄດ້ແນວໃດ
ເປັນຜູ້ຈົບເວທ໑ໄດ້ແນວໃດ
ເປັນຜູ້ມີວິດຊາ ໓ ໄດ້ແນວໃດ

ບັນດິດຮຽກບຸກຄົນຜູ້ມີຄວາມປອດໄພວ່າ ອັນໃດ
　　ບຸກຄົນເປັນພຣະອະຣະຫັນໄດ້ແນວໃດ
ບຸກຄົນມີຄຸນຄົບຖ້ວນໄດ້ແນວໃດ
ບຸກຄົນເປັນມຸນີໄດ້ແນວໃດ
ແລະບັນດິດຮຽກພຣະພຸດທະເຈົ້າວ່າ ອັນໃດ"

[໓໙໔] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຕອບພາມດ້ວຍພຣະຄາຖາວ່າ

　　"ຜູ້ໃດຣະນຶກຊາດກ່ອນ ໆ ໄດ້
ເຫັນສະຫວັນແລະອະບາຍ
ບັນລຸເຖິງຄວາມສິ້ນຊາດ
ຜູ້ນັ້ນຊື່ວ່າເປັນມຸນີຜູ້ຮູ້ຍິ່ງເຖິງທີ່ສຸດ
　　ມຸນີນັ້ນຍ່ອມຮູ້ຈິດອັນບໍລິສຸດ
ອັນພົ້ນຈາກຣາຄະທັງຫລາຍ ໂດຍປະການທັງປວງ
ເປັນຜູ້ລະຊາດແລະມໍລະນະໄດ້ແລ້ວ
ຊື່ວ່າມີຄຸນຄົບຖ້ວນແຫ່ງພົມມະຈັນ
ຊື່ວ່າເຖິງຝັ່ງແຫ່ງທຳທັງປວງ
ບັນດິດຮຽກພຣະພຸດທະເຈົ້າວ່າ ຜູ້ໝັ້ນຄົງ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພົມມາຍຸພາມລຸກຂຶ້ນຈາກທີ່ນັ່ງ ຫົ່ມຜ້າບ່ຽງບ່າໝອບລົງແທບພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ຈູບພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍປາກ ນວດດ້ວຍຝາມືທັງ ໔ ແລະ ປະກາດຊື່ຂອງຕົນວ່າ "ຂ້າແດ່ພຣະໂຄດົມຜູ້ຈະເລີນ ຂ້າພຣະອົງເປັນພາມຊື່ພຣົມມາຍຸ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ຂ້າພຣະອົງເປັນພາມຊື່ພຣົມມາຍຸ"

ຄັ້ງນັ້ນແລ ບໍລິສັດໝູ່ນັ້ນເກີດຄວາມອັດສະຈັນໃຈວ່າ "ເປັນຕາງຶດຫຼາຍ ບໍ່ເຄີຍ ຜາກົດທ່ານຜູ້ຈະເລີນ ພຣະສະມະນະເປັນຜູ້ມີລິດຫຼາຍ ມີອານຸພາບຫຼາຍ ພົມມາຍຸພາມ ນີ້ເປັນຜູ້ມີຊື່ສຽງ ມີຍົດ ຍັງທຳຄວາມເຄົາລົບຍ້ອງຍໍຢ່າງຍິ່ງແນວນີ້"

ຫລັງຈາກນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພົມມາຍຸພາມວ່າ "ພໍແລ້ວລະພາມ ເຊີນທ່ານລຸກຂຶ້ນນັ່ງເທິງບ່ອນນັ່ງຂອງຕົນເທີ້ນ ຍ້ອນຈິດຂອງທ່ານເຫຼື້ອມໃສໃນເຮົາແລ້ວ"

ຈາກນັ້ນ ພົມມາຍຸພາມຈຶ່ງລຸກຂຶ້ນນັ່ງເທິງບ່ອນນັ່ງຂອງຕົນ

## ຊົງສະແດງອະນຸບຸບພີກະຖາ

[໓໔໕] ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າຕັດອະນຸບຸບພີກະຖາ໑ແກ່ພົມມາຍຸພາມ ຄື ຊົງປະກາດເລື້ອງທານ ເລື້ອງສີນ ເລື້ອງສະຫວັນ ເລື້ອງໂທດ ຄວາມຕ່ຳຊາມ ຄວາມເສົ້າໝອງແຫ່ງກາມ ແລະ ອານິສົງໃນການອອກບວຊ ເມື່ອຊົງຮູ້ວ່າ ພົມມາຍຸພາມມີຈິດຄວນບັນລຸທຳ ສະງົບ ອ່ອນ ປາສະຈາກນິວອນ ເບີກບານ ຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສິກະເທດສະໜາ ຄືທຸກ ສະມຸໄທ ນິໂຣດ ມັກ ທຳຈັກຊຸອັນຂາດທຸລີຄືກິເລດ ປາສະຈາກມົນທິນ ເກີດຂຶ້ນແກ່ພົມມາຍຸພາມເທິງທີ່ນັ່ງນັ້ນເອງວ່າ "ສິ່ງໃດສິ່ງໜຶ່ງມີ ຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ" ປຽບຄື ຜ້າຂາວສະອາດ ປາສະຈາກມົນທິນ ຄວນຮັບນ້ຳຍ້ອມໄດ້ເປັນຢ່າງດີ

ລຳດັບນັ້ນ ພົມມາຍຸພາມເຫັນທຳ ບັນລຸທຳ ຮູ້ທຳ ຢັ່ງລົງສູ່ທຳ ໝົດຄວາມສົງໄສ ບໍ່ມີຄຳຖາມໃດ ໆ ມີຄວາມແກ່ກ້າ ບໍ່ຕ້ອງເຊື່ອໃຜອີກ ໃນຫລັກ ຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນນ່ວນຫຼາຍ ຂ້າແດ່ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນນ່ວນຫຼາຍ ທ່ານພຣະໂຄດົມ ຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ່ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫລົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ ອັນໜຶ່ງ ຂໍທ່ານພຣະໂຄດົມພ້ອມດ້ວຍພິກຂຸສົງໂຜດຮັບພັດຕາຫານ ຂອງຂ້າພຣະອົງໃນມື້ອື່ນນີ້ດ້ວຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ

ພົມມາຍຸພາມຮູ້ອາການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງລຸກຈາກທີ່ນັ່ງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈາກໄປ ເມື່ອຜ່ານຄືນນັ້ນໄປພົມມາຍຸພາມໄດ້ກະກຽມຂອງຄວນຫຍ້ຳຄວນສັນອັນປະນີດໄວ້ໃນນິເວດຂອງຕົນ ແລ້ວໃຊ້ໃຫ້ຄົນໄປຂາບທູນພັດຕະການກັບພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ທ່ານພຣະໂຄດົມ ເຖິງເວລາແລ້ວຂ້ານ້ອຍ ພັດຕາຫານສຳເລັດແລ້ວ"

ເມື່ອໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນສະເດັດເຂົ້າໄປສູ່ນິເວດຂອງພົມມາຍຸພາມ ແລ້ວປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວພ້ອມ

ດ້ວຍພິກຂຸສົງ ຕໍ່ມາ ພົມມາຍຸພາມໄດ້ອັງຄາດພິກຂຸສົງມີພຣະພຸດທະເຈົ້າເປັນປະມຸກ ໃຫ້ອີ່ມໜຳດ້ວຍຂອງຄວນຫຍໍ້າຄວນສັນອັນປະນີດດ້ວຍມືຂອງຕົນຕະຫຼອດ ໆ ມື້ ເມື່ອລ່ວງ ໆ ມື້ນັ້ນໄປພຣະຜູ້ມີພຣະພາກເຈົ້າໄດ້ສະເດັດຈາຣິກໄປໃນແຄວ້ນວິເທຫະ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປແລ້ວບໍ່ດົນປານໃດ ພົມມາຍຸພາມກໍໄດ້ສິ້ນຊີວິດໄປ

ຄັ້ງນັ້ນ ພິກຂຸເປັນຈຳນວນຫລາຍພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພົມມາຍຸພາມສິ້ນຊີວິດແລ້ວ ຄະຕິຂອງເຂົາເປັນຢ່າງໃດ ສຳປະຣາຍະພົບຂອງເຂົາເປັນຢ່າງໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸທັງຫລາຍ ພົມມາຍຸພາມເປັນບັນດິດ ໄດ້ບັນລຸທຳແລະທຳຕາມລຳດັບ ບໍ່ບຽດບຽນເຮົາໃຫ້ລຳບາກຍ້ອນເຫດແຫ່ງທຳເລີຍ ພົມມາຍຸພາມເປັນໂອປະປາຕິກະ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ ຈັກປະຣິນິບພານໃນພົບນັ້ນ ບໍ່ກັບມາຈາກໂລກນັ້ນອີກ"

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ພຣົມມາຍຸສູດທີ ໑ ຈົບ**

# ໘. ເສລະສູດ

## ວ່າດ້ວຍເສລະພຣາມ

[໓໙໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນອັງຄຸດຕາປະ ພ້ອມກັບພິກຂຸສົງໝູ່ໃຫຍ່ ປະມານ ໑,໒໕໐ ຮູບ ສະເດັດເຖິງນິຄົມຂອງຊາວອັງຄຸດຕະຣາປະ ຊື່ ອາປະນະຊະດົມ ຊື່ ເກນິຍະໄດ້ສະດັບຂ່າວວ່າ

"ໄດ້ຂ່າວວ່າ ພຣະສະມະນະໂຄດົມເປັນສາກະຍະບຸດສະເດັດອອກບວດຈາກສາກະຍະຕະກູນ ສະເດັດຈາຣິກຢູ່ໃນແຄວ້ນອັງຄຸດກາປະພ້ອມກັບພິກຂຸສົງໝູ່ໃຫຍ່ປະມານ ໑,໒໕໐ ຮູບສະເດັດເຖິງອາປະໜະນິຄົມໂດຍລຳດັບ ທ່ານພຣະໂຄດົມພຣະອົງນັ້ນມີກິດຕິສັບອັນງາມຊ່າລືໄປ

ແນວນີ້ວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະໃນສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາ ແລະ ມະນຸດທັງຫລາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ພຣະອົງຊົງຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດ ພ້ອມທັງສະມະນະພາມ ເທວະດາແລະມະນຸດດ້ວຍພຣະອົງເອງແລ້ວ ຊົງປະກາດໃຫ້ຜູ້ອື່ນຮູ້ຕາມ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ຊົງປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນ ການໄດ້ພົບພຣະອະຣະຫັນທັງຫລາຍແນວນີ້ ເປັນຄວາມດີຢ່າງແທ້ຈິງ"

## ເກນີຍະຊະດິນນິມົນສະເຫວີຍພັດຕາຫານ

ຫລັງຈາກນັ້ນ ເກນີຍະຊະດິນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກຈຶ່ງຊົງຊີ້ແຈ່ງໃຫ້ເກນີຍະຊະດິນເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ ອາດຫານແກ່ກ້າ ຮວຍຮໍາໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ຄັ້ງນັ້ນ ເກນີຍະຊະດິນ ຜູ້ທີ່ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮໍາໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂໍທ່ານພຣະໂຄດົມພ້ອມກັບພິກຂຸສົງ ໂຜດຮັບພັດຕາຫານຂອງຂ້າພຣະອົງໃນມືອື່ນນີ້ເທີ້ນ ຂ້ານ້ອຍ"

ເມື່ອເກນີຍະຊະດິນຂາບທູນແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ "ເກນີຍະ ພິກຂຸສົງມີຫຼາຍຮອດ ໑,໒໕໐ ຮູບ ອັນໜຶ່ງ ທ່ານກໍຍັງເຫຼື້ອມໃສໃນພາມທັງຫລາຍຢູ່"

ແມ່ນເທື່ອທີ ໒ ເກນີຍະຊະດິນກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະໂຄດົມຜູ້ຈະເລີນ ພິກຂຸສົງມີຫຼາຍຮອດ ໑,໒໕໐ ຮູບ ທັງຂ້າພຣະອົງເປັນຜູ້ເຫຼື້ອມໃສໃນພາມທັງຫລາຍແທ້ກໍຈິງ ເຖິງແນວນັ້ນ ຂໍທ່ານພຣະໂຄດົມພ້ອມກັບພິກຂຸສົງໂຜດຮັບ ພັດຕາຫານຂອງຂ້າພຣະອົງໃນມືອື່ນນີ້ດ້ວຍເທີ້ນ ຂ້ານ້ອຍ"

ແມ່ນເທື່ອທີ ໒ ພຣະຜູ້ມີພຣະພາກເຈົ້າກໍຕັດກັບເກນີຍະຊະດິນວ່າ "ເກນີຍະ ພິກຂຸສົງມີຫຼາຍຮອດ ໑,໒໕໐ ຮູບ ອັນໜຶ່ງ ທ່ານກໍຍັງເຫຼື້ອມໃສໃນພາມທັງຫລາຍຢູ່"

ແມ່ນເທື່ອທີ ໓ ເກນີຍະຊະດິນກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະໂຄດົມ ຜູ້ຈະເລີນ ພິກຂຸສົງມີຫຼາຍຮອດ ໑,໒໕໐ ຮູບ ທັງຂ້າພຣະອົງເປັນຜູ້ເຫຼື້ອມໃສໃນພາມທັງ

ຫລາຍຍິ່ງກໍຈິງ ເຖິງແນວນັ້ນ ຂໍທ່ານພຣະໂຄດົມພ້ອມກັບພິກຂຸສົງໂຜດຮັບ ພັດຕາຫານຂອງຂ້າພຣະອົງໃນມືອື່ນນີ້ດ້ວຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ ຄັ້ງນັ້ນ ເກນີຍະຊະດີນຮູ້ອາການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງລຸກຈາກບ່ອນນັ່ງ ເຂົ້າໄປສູ່ອາສົມຂອງຕົນແລ້ວຮຽກມິດສະຫາຍ ຍາດສາໂລຫິດມາບອກວ່າ "ທ່ານທັງຫລາຍ ຂ້າພະເຈົ້າຂໍແຈ້ງໃຫ້ຮູ້ວ່າ ຂ້າພະເຈົ້ານິມົນພຣະສະມະນະໂຄດົມ ພ້ອມກັບພິກຂຸສົງມາສັນພັດຕາຫານໃນມືອື່ນນີ້ ຂໍທ່ານທັງຫລາຍເພິ່ງທຳຄວາມຂົນຂວາຍດ້ວຍກຳລັງກາຍເພື່ອຂ້າພະເຈົ້າດ້ວຍເທີ້ນ"

ພວກມິດສະຫາຍ ແລະ ຍາດສາໂລຫິດຮັບຄຳເກນີຍະຊະດີນແລ້ວ ລາງພວກກໍ່ເຕົາລາງພວກຜ່າຟືນ ລາງພວກລ້າງພາຊະນະ ລາງພວກຕັ້ງໝໍ້ນ້ຳ ລາງພວກປູອາສະນະ ສ່ວນເກນີຍະຊະດີນ ຈັດແຈງໂຮງປະລຳດ້ວຍຕົນເອງ

## ພາມຊື່ເສລະໄດ້ຟັງຄຳວ່າ ພຸດທະ

[໓໘໗] ສະໄໝນັ້ນ ພາມຊື່ເສລະອາໄສຢູ່ໃນອາປະໜະນິຄົມ ເປັນຜູ້ຈົບໄຕຣເພດ ພ້ອມທັງນິກຄັນທຸສາດ ເກຕຸພະສາດ ອັກສອນສາດແລະປະຫວັດສາດ ເຂົ້າໃຈໂຕບົດແລະໄວຍາກອນ ຊ່ຽວຊານໃນໂລກາຍະຕະສາດແລະລັກສະນະມະຫາບຸຣຸດ ທັງຍັງເປັນອາຈານສອນມົນແກ່ມານົບຈຳນວນ ໓໐໐ ຄົນອີກດ້ວຍ ສະໄໝນັ້ນ ເກນີຍະຊະດີນກໍເປັນຜູ້ເຫຼື້ອມໃສໃນເສລະພຣາມຢູ່ ຂະນະນັ້ນ ເສລະພຣາມຮ້ອມລ້ອມດ້ວຍມານົບ ໓໐໐ ຄົນ ຍ່າງທ່ຽວຫລິ້ນຢູ່ ໄດ້ເຂົ້າໄປສູ່ອາສົມຂອງເກນີຍະຊະດີນ ໄດ້ເຫັນຊົນລາງພວກກຳລັງກໍ່ເຕົາ ລາງພວກກຳລັງຜ່າຟືນ ລາງພວກກຳລັງລ້າງພາຊະນະ ລາງພວກກຳລັງຕັ້ງໝໍ້ນ້ຳ ລາງພວກ ກຳລັງປູອາສະນະ ສ່ວນເກນີຍະຊະດີນກຳ ລັງຈັດແຈງໂຮງປະລຳດ້ວຍຕົນເອງ ຈຶ່ງໄດ້ຖາມເກນີຍະຊະດີນ ວ່າ "ທ່ານເກນີຍະ ຈັກມີພິທີອາວາໝົງຄົນຫຼືວິວາໝົງຄົນ ພິທີບູຊາມະຫາຍັນຈະຜາກົດ ແກ່ທ່ານ ຫຼື ທ່ານໄດ້ທູນເຊີນພຣະເຈົ້າພິມພິສານຈອມທັບມະຄົດ ໃຫ້ສະເດັດມາສະເຫວີຍພຣະກະຍາຫານພ້ອມກັບຂ້າຣາດຊະບໍຣິພານໃນມື້ອື່ນນີ້ບໍ?"

ເກນີຍະຊະດີນຕອບວ່າ "ຂ້າແດ່ ທ່ານເສລະ ຂ້າພະເຈົ້າບໍ່ໄດ້ມີພິທີອາວາໝົງຄົນຫຼືວິວາຫະມຸງຄຸນ ແລະ ບໍ່ໄດ້ທູນເຊີນພຣະເຈົ້າພິມພິສານຈອມທັບມະຄົດສະເດັດມາສະເຫວີຍພຣະກະຍາຫານ ພ້ອມກັບຂ້າຣາດຊະບໍຣິພານ ໃນມືອື່ນນີ້ ແຕ່ພິທີບູຊາມະຫາຍັນໄດ້ຜາກົດແກ່ຂ້າພະເຈົ້າ ເນື່ອງຈາກພຣະສະມະນະໂຄດົມຜູ້ເປັນສາກະຍະບຸດ ຜູ້ສະເດັດອອກບວດຈາກສາກະຍະຕະກູນສະເດັດ ຈາຣິກໄປໃນແຄວ້ນອັງຄຸດຕາປະ ພ້ອມກັບພິກຂຸສົງໝູ່ໃຫຍ່ປະມານ ໑,໒໕໐ ຮູບ ສະເດັດເຖິງອາປະໜະນິຄົມແລ້ວ ທ່ານພຣະໂຄດົມພຣະອົງນັ້ນມີກິດຕິສັບອັນງາມຊ່າລືໄປແນວນີ້

ວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ๆລๆ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ຂ້າພະເຈົ້າໄດ້ທູນນິມົນທ່ານພຣະໂຄດົມພຣະອົງນັ້ນ ພ້ອມດ້ວຍພິກຂຸສົງມາສັນພັດຕາຫານໃນມື້ອື່ນນີ້"

ເສລະພຣາມ ຖາມວ່າ "ທ່ານເກນິຍະ ທ່ານກ່າວຄຳວ່າ "ພຸດທະ" ບໍ?"

ເກນິຍະຊະດິນ ຕອບວ່າ "ທ່ານເສລະ ແມ່ນ ຂ້າພະເຈົ້າກ່າວຄຳວ່າ "ພຸດທະ"

ເສລະພຣາມ ຖາມຢໍ້າອີກວ່າ "ທ່ານເກນິຍະ ທ່ານກ່າວຄຳວ່າ "ພຸດທະ" ແມ່ນບໍ?"

ເກນິຍະຊະດິນ ຕອບວ່າ "ທ່ານເສລະ ແມ່ນແລ້ວ ຂ້າພະເຈົ້າກ່າວຄຳວ່າ "ພຸດທະ"

[໓໙໗] ຄັ້ງນັ້ນ ເສລະພຣາມໄດ້ຄິດວ່າ "ແມ່ນແຕ່ສຽງປະກາດວ່າພຸດທະນີ້ແລ ກໍຫາໄດ້ຍາກໃນໂລກ ພຣະມະຫາບຸຣຸດຜູ້ປະກອບດ້ວຍລັກສະນະມະຫາບຸຣຸດ ໓໒ ປະການທີ່ຜາກົດໃນມົນຂອງເຮົາ ຍ່ອມມີຄະຕິເປັນ ໒ ແນວ ບໍ່ເປັນແນວອື່ນ ຄື

໑. ຖ້າຊົງຢູ່ຄອງເຮືອນຈະໄດ້ເປັນພຣະເຈົ້າຈັກກະພັດຜູ້ຊົງທຳ ໌ຄອງຣາດ ໂດຍທຳ ຊົງເປັນໃຫຍ່ໃນແຜ່ນດິນມີມະຫາສະມຸດທັງ ໔ ເປັນຂອບເຂດ ຊົງໄດ້ຮັບໄຊຊະນະ ມີລາຊະອານາຈັກໝັ້ນຄົງ ສົມບູນດ້ວຍແກ້ວ ๗ ປະການ ຄື (໑) ຈັກແກ້ວ (໒) ຊ້າງແກ້ວ (໓) ມ້າແກ້ວ (໔) ມະນີແກ້ວ (໕) ນາງແກ້ວ (໖) ຄະຫະບໍດີແກ້ວ (๗) ປະຣິນາຍົກແກ້ວ ມີພຣະຣາຊະໂອຣົດຫລາຍກວ່າ ໑,໐໐໐ ອົງ ເຊິ່ງລ້ວນແຕ່ກ້າຫານ ມີຮູບຊົງສົມເປັນວີຣະກະສັຕຍ໌ ສາມາດຢ່ຳຢີຣາຊະສັດຕູໄດ້ ພຣະອົງຊົງຊະນະໂດຍທຳ ບໍ່ຕ້ອງໃຊ້ອາດຍາ ຫຼືອາວຸດ ຊົງຄອບຄອງແຜ່ນດິນນີ້ມີສາຄອນເປັນຂອບເຂດ

໒. ຖ້າສະເດັດອອກຈາກພະຣາດຊະວັງໄປບວດເປັນບັນພະຊິດຈະໄດ້ເປັນພຣະອະຣະຫັນຕະ-ສຳມາສຳພຸດທະເຈົ້າ ຜູ້ບໍ່ມີກິເລດໃນໂລກ"

## ເສລະພຣາມເຂົ້າເຝົ້າພຣະພຸດທະເຈົ້າ

ເສລະພຣາມຖາມວ່າ "ທ່ານເກນິຍະ ບັດນີ້ ທ່ານພຣະໂຄດົມອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ປະທັບຢູ່ທີ່ໃດ?"

ເມື່ອເສລະພຣາມຖາມແນວນີ້ແລ້ວ ເກນິຍະຊະດິນໄດ້ຍົກແຂນຂວາຊີ້ບອກເສລະພຣາມວ່າ "ທ່ານເສລະ ທ່ານຈົ່ງຍ່າງໄປທາງບໍລິເວນທິວໄມ້ສີຂຽວນັ້ນເທີ້ນ"

ຫລັງຈາກນັ້ນ ເສລະພຣາມພ້ອມດ້ວຍມານົບ ໓໐໐ ຄົນ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ພ້ອມຮຽກມານົບເຫຼົ່ານັ້ນມາເຕືອນວ່າ "ທ່ານທັງຫລາຍ ຈົ່ງຢ່າສົ່ງສຽງດັງຄ່ອຍ ໆ ຍ່າງຕາມກັນໄປໃຫ້ເປັນລະບຽບ ຍ້ອນທ່ານຜູ້ຈະເລີນເຫຼົ່ານັ້ນຊອບຢູ່ຕາມລຳພັງ ຄືພະຍາຣາດຊະສີໃຫ້ຍິນດີໄດ້ຍາກ ອັນໜຶ່ງ ຂະນະທີ່ເຮົາກຳລັງສົນທະນາກັບພຣະສະມະນະໂຄດົມທ່ານຈົ່ງຢ່າເວົ້າສອດແຊກຂຶ້ນ ຖ້າໃຫ້ເຮົາສົນທະນາຈົບເສຍກ່ອນ"

ລຳດັບນັ້ນ ເສລະພຣາມໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ພິຈາລະນາເບິ່ງລັກສະນະມະຫາບຸຣຸດ ໓໒ ປະການໃນພຣະວໍຣະກາຍຂອງພຣະຜູ້ມີພຣະພາກເຈົ້າ

ເສລະພຣາມໄດ້ເຫັນລັກສະນະມະຫາບຸຣຸດ ໓໒ ປະການໃນພຣະວໍຣະກາຍຂອງພຣະຜູ້ມີພຣະພາກໂດຍຫຼາຍ ເວັ້ນຢູ່ ໒ ປະການ ຄື (໑) ພຣະຄຸຍຫະຖານອັນເຊື່ອງຢູ່ໃນຝັກ (໒) ພຣະຊິວຫາໃຫຍ່ ຈຶ່ງຍັງເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນລັກສະນະມະຫາບຸຣຸດທັງ ໒ ປະການ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງດຳຣິວ່າ "ເສລະພຣາມນີ້ເຫັນລັກສະນະມະຫາບຸຣຸດ ໓໒ ປະການຂອງເຮົາໂດຍຫຼາຍ ເວັ້ນຢູ່ ໒ ປະການ ຄື (໑) ຄຸຍຫະຖານ ອັນລີ້ຢູ່ໃນຝັກ (໒) ຊິວຫາໃຫຍ່ ຈຶ່ງຍັງເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນລັກສະນະມະຫາບຸຣຸດ ອີກ ໒ ປະການ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງບັນດານອິດທາພິສັງຂານໃຫ້ເສລະພຣາມໄດ້ເຫັນພຣະຄຸຍຫະຖານອັນເຊື່ອງຢູ່ໃນຝັກ ແລະ ຊົງແລບພຣະຊິວຫາສອດເຂົ້າໄປໃນຊ່ອງພຣະກັນທັງ ໒ ຂ້າງກັບໄປກັບມາ ສອດເຂົ້າຊ່ອງພຣະນາສິກທັງ ໒ ຂ້າງກັບໄປກັບມາ ຊົງແຜ່ພຣະຊິວຫາອັດທົ່ວມົນທົນພຣະນະລາດ

## ເສລະພຣາມກັບສິດຂາບທູນຂໍບັນພະຊາອຸປະສົມບົດ

ຄັ້ງນັ້ນ ເສລະພຣາມໄດ້ຄິດວ່າ "ພຣະສະມະນະໂຄດົມຊົງປະກອບດ້ວຍລັກສະນະ ມະຫາບຸຣຸດ ໓໒ ປະການບໍລິບູນ ບໍ່ບົກຜ່ອງ ແຕ່ເຮົາຍັງບໍ່ຮູ້ວ່າພຣະອົງເປັນພຣະພຸດທະເຈົ້າແມ່ນແທ້ບໍ ເຮົາໄດ້ສະດັບເລື້ອງນີ້ມາຈາກສຳນັກຂອງພາມທັງຫລາຍເຊິ່ງເປັນ ຄົນຊະຣາ ເປັນຜູ້ໃຫຍ່ ເປັນອາຈານແລະປາຈານ ຜູ້ກ່າວກັນວ່າ "ພຣະຜູ້ມີພຣະພາກເຈົ້າ ອະຣະຫັນຕະສຳມາສຳພຸດທະເຈົ້າທັງຫລາຍ ຍ່ອມສະແດງພຣະອົງໃຫ້ຜາກົດໃນເມື່ອບຸກຄົນກ່າວເຖິງຄຸນຂອງພຣະອົງທາງທີ່ດີ ເຮົາຄວນຊົມເຊີຍພຣະສະມະນະໂຄດົມສະເພາະພຣະພັກເປັນຄາຖາທີ່ເໝາະສົມ"

[໖໙໙] ລຳດັບນັ້ນ ເສລະພຣາມຈຶ່ງຊົມເຊີຍພຣະຜູ້ມີພຣະພາກເຈົ້າສະເພາະພຣະພັກດ້ວຍຄາຖາທີ່ເໝາະສົມວ່າ

"ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ພຣະອົງສະເດັດອຸບັດມາດີແລ້ວ
ມີພຣະວິຣິຍະພາບ ມີພຣະວໍຣະກາຍສົມບູນ
ມີພຣະຣັດສະໝີເຮືອງງາມ ເປັນຜູ້ໜ້າທັດສະນາຍິ່ງ
ມີພຣະສະຫວີວັນນະພຸດຜ່ອງດັ່ງຄຳ
ມີພຣະຂ້ຽວແກ້ວຂາວສະອາດ
ຍ້ອນພຣະລັກສະນະມະຫາບຸຣຸດ
ທີ່ມີຜາກົດແກ່ມະຫາບຸຣຸດນັ້ນ
ຍ່ອມມີຜາກົດໃນພຣະວໍຣະກາຍຂອງພຣະອົງແນວຄົບຖ້ວນ
ພຣະອົງມີພຣະເນດແຈ່ມໃສ ມີພຣະພັກຜຸດຜ່ອງ
ມີພຣະວໍຣະກາຍສູງໃຫຍ່ກົງ
ມີພຣະອຳນາດ ຊົງຮຸ່ງເຮືອງຢູ່ໃນທ່າມກາງໝູ່ສະມະນະ
ຄືດວງອາທິດຮຸ່ງເຮືອງຢູ່
ພຣະອົງເປັນພິກຂຸ ມີຄຸນສົມບັດງົດງາມໜ້າຊົມ
ມີພຣະສະຫວີວັນນະຜຸດຜ່ອງດັ່ງຄຳ
ພຣະອົງມີພຣະວັນນະສູງສົ່ງເຖິງພຽງນີ້
ຈະເປັນສະມະນະໄປເຮັດຫຍັງ
ພຣະອົງຄວນເປັນພຣະເຈົ້າຈັກກະພັດ
ທີ່ອົງອາດໃນໝູ່ພົນລົດ ຊົງປາບປາມໄພຣີຊະນະ
ຊົງເປັນໃຫຍ່ໃນພາກພື້ນຊົມພູທະວີບ
ເຊິ່ງມີສະມຸດສາຄອນທັງສີ່ເປັນຂອບເຂດ
ຂ້າແດ່ພຣະໂຄດົມ ຂໍເຊີນພຣະອົງຂຶ້ນຄອງຣາດ
ເປັນພຣະເຈົ້າຈັກກະພັດຈອມມະນຸດຕາມພຣະຣາຊະປະເພນີ
ທີ່ກະສັຕຕຣາທິຣາຊໂດຍພຣະຊາດໄດ້ສະເຫວີຍຣາດ
ມີໝູ່ເສວກາມາຕຍ໌ສະເດັດຕາມພຣະອົງເທີ້ນ"

(ພຣະຜູ້ມີພຣະພາກເຈົ້າຕັດພຣະຄາຖາວ່າ)

"ເສລະພຣາມ ເຮົາເປັນພຣະຣາຊາຢູ່ແລ້ວ
ຄືເປັນພຣະທຳຣາຊາຜູ້ປະເສີດ
ຍັງທຳມະຈັກທີ່ບໍ່ມີໃຜ ໆ ໝຸນໄປໄດ້ ໃຫ້ໝຸນໄປໄດ້"

(ເສລະພຣາມຂາບທູນວ່າ)

"ຂ້າແດ່ທ່ານພຣະໂຄດົມ ພຣະອົງຊົງປະຕິຍານວ່າ
ເປັນສຳມາສຳພຸດທະເຈົ້າ ເປັນພຣະທຳຣາຊາຜູ້ປະເສີດ
ທັງຍັງຕັດຍັ້ງຢືນວ່າຍັງທຳມະຈັກໃຫ້ເປັນໄປ
ໃຜນໍເປັນເສນາບໍດີຂອງພຣະອົງຜູ້ຈະເລີນ
ເປັນສາວົກຜູ້ປະພຶດຕາມເບື້ອງພຣະບາດທັງສອງຂອງພຣະອົງຜູ້ເປັນສາດສະດາ
ໃຜຈະຊ່ອຍປະກາດທຳມະຈັກທີ່ພຣະອົງຊົງໃຫ້ເປັນໄປແລ້ວນີ້ໄດ້"

(ພຣະຜູ້ມີພຣະພາກເຈົ້າຕັດຕອບດ້ວຍພຣະຄາຖາວ່າ)

"ເສລະພຣາມ ສາຣີບຸດຜູ້ເກີດຕາມຕະຖາຄົດ
ຈະຊ່ອຍປະກາດທຳມະຈັກຢູ່ຍອດຢ້ຽມ
ເຊິ່ງເຮົາໃຫ້ເປັນໄປໄວ້ແລ້ວ
ພາມ ເຮົາໄດ້ຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ໑
ໄດ້ຈະເລີນທຳທີ່ຄວນໃຫ້ຈະເລີນ໔
ໄດ້ລະທຳທີ່ຄວນລະ໓ໄດ້ແລ້ວ
ຍ້ອນແນວນັ້ນ ເຮົາຈຶ່ງເປັນພຣະພຸດທະເຈົ້າ
ພາມ ທ່ານຈົ່ງກຳຈັດຄວາມສົງໄສໃນໂຕເຮົາເສຍ
ຈົ່ງນ້ອມໃຈເຊື່ອເຮົາສາເທີ້ນ
ການໄດ້ເຫັນພຣະສຳມາສຳພຸດທະເຈົ້າເນືອງ ໆ
ເປັນໂອກາດທີ່ຫາໄດ້ຍາກ
ຜູ້ຈະຜາກົດເນືອງ ໆ ໃນໂລກ
ຍ່ອມເປັນການຫາໄດ້ຍາກ
ພາມ ເຮົານັ້ນເປັນພຣະພຸດທະເຈົ້າ
ເປັນໝໍປາດລູກສອນຄືກິເລດຊັ້ນເລີດ
ເຮົາເປັນຜູ້ປະເສີດສຸດ ບໍ່ມີຜູ້ປຽບທຽບ
ຍ່ຳຍີມານແລະເສນາມານໄດ້
ຄວບຄຸມອະມິດທັງໝົດ໔ໄວ້ໃນອຳນາດ
ບໍ່ມີໄພຈາກຢູ່ໄສ ເບີກບານຢູ່"

(ເສລະພຣາມກ່າວດ້ວຍຄາຖາວ່າ)

"ຂ້າແດ່ພຣະອົງຜູ້ຈະເລີນ ຂໍເຊີນພຣະອົງ

ຈົ່ງຊົງພິຈາຣະນາຄຳຂອງຂ້າພຣະອົງນີ້
ຄືແນວທີ່ພຣະຜູ້ມີພຣະພາກເຈົ້າ ຜູ້ມີພຣະຈັກຂຸ
ເປັນໝໍປາດລູກສອນຄືກິເລດ
ເປັນມະຫາວິຣະຕັດໄວ້
ຄືພະຍາຣາດຊະສີບັນລືສີຫະນາດຢູ່ໃນປ່າ
ໃຜເຫັນພຣະຜູ້ມີພຣະພາກເຈົ້າຜູ້ປະເສີດສຸດ
ບໍ່ມີຜູ້ປຽບທຽບ
ຍ່ຳຍີມານແລະເສນາມານໄດ້ ຈຶ່ງຈະບໍ່ເຫຼື້ອມໃສນໍ
ເຖິງຄົນຜູ້ເກີດໃນຕະກູນຕ່ຳກໍຍັງເຫຼື້ອມໃສ
ຜູ້ປາຖະໜາ ຈະມານຳເຮົາ ກໍເຊີນມາ
ຫຼືຜູ້ທີ່ບໍ່ປາຖະໜາ ກໍເຊີນກັບໄປ
ເຮົາຈະບວດໃນສຳນັກຂອງພຣະສຳມາສຳພຸດທະເຈົ້າ
ຜູ້ມີພຣະປັນຍາປະເສີດນີ້"

(ມານົບເຫຼົ່ານັ້ນກ່າວດ້ວຍຄາຖາວ່າ)

"ຫາກທ່ານອາຈານປະທັບໃຈຄຳສອນ
ຂອງພຣະສຳມາສຳພຸດທະເຈົ້າແນວນີ້
ແມ່ນເຮົາທັງຫລາຍກໍຈະບວດ
ໃນສຳນັກຂອງພຣະສຳມາສຳພຸດທະເຈົ້າ
ຜູ້ມີພຣະປັນຍາປະເສີດ"
ພາມ ໓໐໐ ຄົນນີ້ພາກັນປະນົມມື ທູນຂໍບັນພະຊາວ່າ
"ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງທັງຫລາຍ
ຈະປະພຶດພົມມະຈັນ ໃນສຳນັກຂອງພຣະອົງ"

(ພຣະຜູ້ມີພຣະພາກເຈົ້າຕັດດ້ວຍພຣະຄາຖາວ່າ)

"ເສລະ ພົມມະຈັນເຮົາກ່າວໄວ້ແລ້ວ
ຜູ້ບັນລຸຈະເຫັນໄດ້ເອງ ໃຫ້ຜົນບໍ່ຈຳກັດການ
ໃນສາດສະໜາທີ່ມີການບັນພະຊາບໍ່ຂາດຜົນ
ເມື່ອຄົນທີ່ບໍ່ຜະໝາດ ໝັ່ນສຶກສາຢູ່"

ເສລະພຣາມ ພ້ອມທັງບໍລິວານໄດ້ຮັບການບັນພະຊາອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວ

[໔໐໐] ເມື່ອຜ່ານຄືນນັ້ນໄປ ເກນິຍະຊະດິນສັ່ງໃຫ້ຈັດຂອງຫຍ້ຳຂອງຂ້ອຍອັນປະນີດໄວ້ໃນອາສົມຂອງຕົນ ແລ້ວສັ່ງຄົນໄປຂາບທູນພັດຕະການວ່າ "ຂ້າແດ່ ພຣະໂຄດົມຜູ້ຈະເລີນ ໄດ້ເວລາແລ້ວ ພັດຕາຫານສຳເລັດແລ້ວ ຂ້ານ້ອຍ"

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນສະເດັດໄປສູ່ອາສົມຂອງເກນິຍະຊະດິນ ແລະ ປະທັບເທິງພຸດທະອາດທີ່ປູລາດໄວ້ແລ້ວພ້ອມດ້ວຍພິກຂຸສົງ

ຈາກນັ້ນ ເກນິຍະຊະດິນໄດ້ອັງຄາດພິກຂຸສົງ ເຊິ່ງມີພຣະພຸດທະເຈົ້າເປັນປະທານໃຫ້ອີ່ມໜຳສຸກສະບາຍ ດ້ວຍຂອງຫຍ້ຳຂອງຂ້ອຍອັນປະນີດດ້ວຍຕົນເອງ ເມື່ອພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດຊົງວາງພຣະຫັດແລ້ວ ເກນິຍະຊະດິນເລືອກນັ່ງຢູ່ບ່ອນທີ່ສົມຄວນ ທີ່ໃດທີ່ໜຶ່ງເຊິ່ງຕ່ຳກວ່າ

## ພຣະພຸດທະເຈົ້າຊົງອະນຸໂມທະນາແກ່ເກນິຍະຊະດິນ

ພຣະຜູ້ມີພຣະພາກເຈົ້າຊົງອະນຸໂມທະນາແກ່ເກນິຍະຊະດິນດ້ວຍພຣະຄາຖາເຫລົ່ານີ້ວ່າ

"ການບູຊາໄຟເປັນການບູຊາຍັນອັນປະເສີດ
ວ່າດ້ວຍເລື້ອງສັນ ສາວິຕະຣີສັນເປັນສັນອັນດັບທຳອິດ
ພຣະຣາຊາເປັນປະມຸກຂອງມະນຸດທັງຫລາຍ
ສະມຸດສາຄອນເປັນສູນລວມແຫ່ງແມ່ນ້ຳທັງຫລາຍ
ດາວເລີກທັງຫລາຍ ມີດວງຈັນແຈ່ມກວ່າ
ມວນຄວາມຮ້ອນມີດວງອາທິດເປັນເຈົ້າ
ໝູ່ຊົນຜູ້ມຸ້ງສະແຫວງບຸນຢູ່ມີພຣະສົງທີ່ນັ້ນ
ເປັນທາງຈະເລີນແຫ່ງບຸນແທ້ຈິງຂອງຜູ້ບູຊາ"

ເມື່ອພຣະຜູ້ມີພຣະພາກເຈົ້າ ຊົງເຮັດອະນຸໂມທະນາແກ່ເກນິຍະຊະດິນດ້ວຍພຣະຄາຖາເຫລົ່ານີ້ແລ້ວ ກໍສະເດັດລຸກຈາກພຸດທະອາດຈາກໄປ

ຕໍ່ມາ ທ່ານພຣະເສລະພ້ອມດ້ວຍພິກຂຸຜູ້ເປັນບໍລິວານ ຈາກໄປຢູ່ພຽງລຳພັງ ບໍ່ຜະໝາດມີຄວາມພຽນ ອຸທິດກາຍແລະໃຈ ບໍ່ດົນປານໃດກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນ ທີ່ສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນແນ່ແທ້ ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບ ພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ຈຶ່ງເປັນອັນວ່າ ທ່ານພຣະເສລະພ້ອມກັບພິກຂຸຜູ້ເປັນບໍລິວານໄດ້ເປັນພຣະອະຣະຫັນຈຳນວນໜຶ່ງບັນດາພຣະອະຣະຫັນທັງຫລາຍ

ຄັ້ງນັ້ນ ທ່ານພຣະເສລະພ້ອມດ້ວຍພິກຂຸຜູ້ເປັນບໍລິວານໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຫົ່ມຈີວອນບ່ຽງບ່າ ປະຄອງອັນຊະລີໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໄດ້ຂາບທູນດ້ວຍຄາຖາວ່າ

"ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຜູ້ມີພຣະຈັກຂຸ
ຂ້າພຣະອົງທັງຫລາຍເຖິງພຣະອົງເປັນສະຣະນະຄົບ ໘ ມື້ນັບຈາກມື້ນີ້
ຈຶ່ງເປັນອັນວ່າຂ້າພຣະອົງທັງຫລາຍເຝິກຝົນຕົນສຳເລັດ
ໃນສາດສະໜາຂອງພຣະອົງໃຊ້ເວລາ ໗ ມື້ທີ່ນັ້ນ
ພຣະອົງຊົງເປັນພຣະສັບພັນຍູພຸດທະເຈົ້າ ເປັນພຣະສາດສະດາ
ເປັນພຣະມຸນີຜູ້ຄອບງຳມານໄດ້
ຊົງຕັດອະນຸໄສກິເລດໄດ້ ຊົງຂ້າມແມ່ນ້ຳໃຫຍ່ຄືສົງສານໄດ້ແລ້ວ
ຍັງຊົງຊ່ອຍໝູ່ສັດນີ້ໃຫ້ຂ້າມຕາມໄປໄດ້ດ້ວຍ
ພຣະອົງຊົງລ່ວງພົ້ນອຸປະທິໄດ້
ທຳລາຍອາສະວະໄດ້ແລ້ວ ບໍ່ມີອຸປາທານ
ລະຄວາມຢ້ານກົວໄພໄດ້
ຄືພະຍາຣາດຊະສີບໍ່ຢ້ານຕໍ່ໝູ່ເນື້ອ"
ພິກຂຸ ໓໐໐ ອົງນີ້ ຢືນປະນົມມືຢູ່ ຂາບທູນວ່າ
"ຂ້າແດ່ ພຣະອົງຜູ້ຊົງແກ່ກ້າ
ຂໍພຣະອົງໂຜດຢຽດພຣະບາດທັງສອງອອກເທີ້ນ
ຂໍເຊີນທ່ານຜູ້ປະເສີດທັງຫລາຍ
ຖວາຍອະພິວາດພຣະບໍຣົມມະສາດສະດາເທີ້ນ" ດັ່ງນີ້ແລ

**ເສລະສູດທີ ໘ ຈົບ**

# ໓. ອັດສະລາຍະນະສູດ

## ວ່າດ້ວຍອັດສະລາຍະນະມານົບ

[໔໐໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເຊຕະວັນ ອາຣາມຂອງອະນາຖະບິນ

ທີກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນແລ ພາມຜູ້ມາຈາກແຄວ້ນຕ່າງ ໆ ປະມານ ໕໐໐ ຄົນ ພັກອາໄສຢູ່ໃນນະຄອນສາວັດຖີ ດ້ວຍວຽກງານບາງຢ່າງ ຄັ້ງນັ້ນ ພາມເຫຼົ່ານັ້ນ ໄດ້ຄິດວ່າ "ພຣະສະມະນະໂຄດົມນີ້ຊົງບັນຍັດຄວາມບໍລິສຸດທີ່ທົ່ວໄປແກ່ວັນນະ ໔ ຈຳພວກ ໃຜນໍ ຈະສາມາດເຈລະຈາໂຕ້ຕອບກັບພຣະສະມະນະໂຄດົມໃນຄຳນັ້ນໄດ້"

ສະໄໝນັ້ນ ມານົບຊື່ອັດສະລາຍະນະ ອາໄສຢູ່ໃນນະຄອນສາວັດຖີ ຍັງເປັນໜຸ່ມ ແຖຫົວມີອາຍຸ ໑໖ ປີ ນັບແຕ່ເກີດມາ ເປັນຜູ້ຈົບໄຕຣເພດ ພ້ອມທັງນິກຄັນທຸສາດ ເກຕຸພະສາດ ອັກສອນສາດ ແລະ ປະຫວັດສາດ ເຂົ້າໃຈໂຕບົດແລະໄວຍາກອນ ຊ່ຽວຊານໃນໂລກາຍະຕະສາດແລະລັກສະນະມະຫາບຸຣຸດ

ຄັ້ງນັ້ນ ພາມເຫຼົ່ານັ້ນຄິດກັນວ່າ "ອັດສະລາຍະນະມານົບຜູ້ນີ້ ອາໄສຢູ່ໃນນະຄອນສາວັດຖີ ຍັງເປັນໜຸ່ມ ຯລຯ ຊ່ຽວຊານໂລກາຍະຕະສາດ ແລະ ລັກສະນະມະຫາບຸຣຸດ ເຂົາຈະສາມາດເຈລະຈາໂຕ້ຕອບກັບພຣະສະມະນະໂຄດົມໃນຄຳນັ້ນໄດ້"

ລຳດັບນັ້ນ ພາມເຫຼົ່ານັ້ນພາກັນເຂົ້າໄປຫາອັດສະລາຍະນະມານົບຮອດບ່ອນຢູ່ ແລ້ວໄດ້ກ່າວວ່າ "ອັດສະລາຍະນະ ພຣະສະມະນະໂຄດົມນີ້ ຊົງບັນຍັດຄວາມບໍລິສຸດທີ່ທົ່ວໄປແກ່ວັນນະ ໔ ຈຳພວກ ອັດສະລາຍະນະ ຈົ່ງໄປເຈລະຈາໂຕ້ຕອບກັບພຣະສະມະນະໂຄດົມໃນຄຳນັ້ນເທີ້ນ"

ເມື່ອພາມທັງຫລາຍກ່າວແນວນີ້ແລ້ວ ອັດສະລາຍະນະມານົບໄດ້ກ່າວກັບພາມ ເຫຼົ່ານັ້ນວ່າ "ທ່ານຜູ້ຈະເລີນທັງຫລາຍ ໄດ້ຮູ້ວ່າ ພຣະສະມະນະໂຄດົມເປັນທຳວາທີທີ່ບຸກຄົນ ຈະເພິ່ງເຈລະຈາໂຕ້ຕອບໄດ້ຍາກ ຂ້າພະເຈົ້າບໍ່ສາມາດຈະເຈລະຈາໂຕ້ຕອບກັບພຣະສະມະນະໂຄດົມໃນຄຳນັ້ນໄດ້"

ແມ່ນເທື່ອທີ ໒ ພາມເຫຼົ່ານັ້ນກໍໄດ້ກ່າວກັບອັດສະລາຍະນະມານົບວ່າ "ອັດສະລາຍະນະ ພຣະສະມະນະໂຄດົມນີ້ ຊົງບັນຍັດຄວາມບໍລິສຸດທີ່ທົ່ວໄປແກ່ວັນນະ ໔ ຈຳພວກ ພໍ່ອັດສະລາຍະນະ ຈົ່ງໄປເຈລະຈາໂຕ້ຕອບກັບພຣະສະມະນະໂຄດົມໃນຄຳນັ້ນເທີ້ນ ອັດສະລາຍະນະໄດ້ປະພຶດວິທີບັນພະຊາມາແລ້ວ"

ແມ່ນເທື່ອທີ ໒ ອັດສະລາຍະນະມານົບກໍໄດ້ກ່າວກັບພາມເຫຼົ່ານັ້ນວ່າ "ທ່ານຜູ້ຈະເລີນທັງຫລາຍ ໄດ້ຮູ້ວ່າ ພຣະສະມະນະໂຄດົມເປັນທຳວາທີ ທີ່ບຸກຄົນຈະເພິ່ງເຈລະຈາໂຕ້ຕອບ ໄດ້ຍາກ ຂ້າພະເຈົ້າບໍ່ສາມາດຈະເຈລະຈາໂຕ້ຕອບກັບພຣະສະມະນະໂຄດົມໃນຄຳນັ້ນໄດ້"

ແມ່ນເທື່ອທີ ໓ ພາມເຫຼົ່ານັ້ນກໍໄດ້ກ່າວກັບອັດສະລາຍະນະມານົບວ່າ "ອັດສະລາຍະນະ

ພຣະສະມະນະໂຄດົມນີ້ ຊົງບັນຍັດຄວາມບໍລິສຸດທີ່ທົ່ວໄປແກ່ວັນນະ ໔ ຈຳພວກ ອັດສະລາຍະນະ ຈົ່ງເຂົ້າໄປເຈລະຈາໂຕ້ຕອບກັບພຣະສະມະນະໂຄດົມໃນຄຳນັ້ນເທີ້ນ ອັດສະລາຍະນະໄດ້ປະພຶດວິທີບັນພະຊາມາແລ້ວ ອັດສະລາຍະນະຢ່າຍອມປຣາໄຊເສຍຕັ້ງແຕ່ຍັງບໍ່ຮົບເລີຍ"

ເມື່ອພາມເຫຼົ່ານັ້ນກ່າວແນວນີ້ແລ້ວ ອັດສະລາຍະນະມານົບໄດ້ກ່າວກັບພາມ ເຫຼົ່ານັ້ນວ່າ "ທ່ານຜູ້ຈະເລີນທັງຫລາຍ ຂ້າພະເຈົ້າຍອມບໍ່ໄດ້ແນ່ ໄດ້ຮູ້ວ່າ ພຣະສະມະນະໂຄດົມເປັນທຳວາທີ ທີ່ບຸກຄົນຈະເພິ່ງເຈລະຈາໂຕ້ຕອບໄດ້ຍາກ ຂ້າພະເຈົ້າຄົງບໍ່ສາມາດຈະເຈລະຈາ ໂຕ້ຕອບກັບພຣະສະມະນະໂຄດົມໃນຄຳນັ້ນໄດ້ ແຕ່ຂ້າພະເຈົ້າຈັກໄປຕາມຄຳຂອງທ່ານທັງຫລາຍ"

## ເລື້ອງວັນນະ ໔ ຈຳພວກ

[໔໐໘] ລຳດັບນັ້ນ ອັດສະລາຍະນະມານົບພ້ອມດ້ວຍຄະນະພາມໝູ່ໃຫຍ່ ພາກັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນ ທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ

"ຂ້າແດ່ ທ່ານພຣະໂຄດົມ ພາມທັງຫລາຍກ່າວແນວນີ້ວ່າ "ວັນນະທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ວັນນະອື່ນຊົ່ວ ວັນນະທີ່ຂາວຄືພາມທໍ່ນັ້ນ ວັນນະອື່ນດຳ ພາມທໍ່ນັ້ນບໍລິສຸດ ຜູ້ທີ່ບໍ່ແມ່ນພາມບໍ່ບໍລິສຸດ ພາມ ທໍ່ນັ້ນເປັນບຸດ ເປັນໂອຣົດ ເກີດຈາກໂອດຂອງພົມ ເກີດຈາກພົມ ເປັນຜູ້ທີ່ພົມ ສ້າງຂຶ້ນ ເປັນທາຍາດຂອງພົມ" ໃນເລື້ອງນີ້ທ່ານພຣະໂຄດົມໄດ້ຕັດໄວ້ແນວໃດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອັດສະລາຍະນະ ນາງພຣາມມະນີຂອງພາມທັງຫລາຍມີຣະດູແດ່ ຖືພາແດ່ເກີດລູກແດ່ ໃຫ້ບຸດດື່ມນົມແດ່ ຜາກົດຢູ່ພາມ ເຫຼົ່ານັ້ນເຊິ່ງເປັນຜູ້ເກີດຈາກໂຍນີຄືກັນ ຍັງຈະກ່າວແນວນີ້ວ່າ "ວັນນະທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ວັນນະອື່ນຊົ່ວ ວັນນະທີ່ຂາວຄືພາມທໍ່ນັ້ນ ວັນນະອື່ນດຳ ພາມທໍ່ນັ້ນບໍລິສຸດ ຜູ້ທີ່ບໍ່ແມ່ນພາມບໍ່ບໍລິສຸດ ພາມທໍ່ນັ້ນເປັນບຸດ ເປັນໂອຣົດ ເກີດຈາກໂອດຂອງພົມ ເກີດຈາກພົມ ເປັນຜູ້ທີ່ພົມສ້າງຂຶ້ນ ເປັນທາຍາດຂອງພົມ"

ອັດສະລາຍະນະມານົບຂາບທູນວ່າ "ທ່ານພຣະໂຄດົມຕັດແນວນີ້ກໍຈິງ ແຕ່ເລື້ອງພາມທັງຫລາຍກໍຍັງເຂົ້າໃຈເລື້ອງນັ້ນຢູ່ແນວນີ້ວ່າ "ວັນນະທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ຯລຯ ເປັນທາຍາດຂອງພົມ"

[໔໐໙] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອັດສະລາຍະນະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ທ່ານໄດ້ຟັງມາແລ້ວບໍວ່າ "ໃນແຄວ້ນໂຍນົກ ແຄວ້ນກຳໂພຊະ ແລະ ປັດຈັນຕະຊົນນະ ບົດ ອື່ນ ໆ ມີວັນນະຢູ່ ໒ ຈຳພວກທໍ່ນັ້ນ ຄື (໑) ເຈົ້າ (໒) ຂ້າທາດ ເປັນເຈົ້າແລ້ວກັບເປັນຂ້າທາດ ເປັນຂ້າທາດແລ້ວກັບເປັນເຈົ້າ"

ອັດສະລາຍະນະມານົບທູນຕອບວ່າ "ຂ້າແດ່ ທ່ານຜູ້ຈະເລີນ ຂ້າພະເຈົ້າເຄີຍຟັງຄວາມຂໍ້ນັ້ນມາແລ້ວແນວນີ້ວ່າ "ໃນແຄວ້ນໂຍນົກ ແຄວ້ນກຳໂພຊະ ແລະ ປັດຈັນຕະຊົນນະບົດອື່ນ ໆ ມີວັນນະຢູ່ ໒ ຈຳພວກທໍ່ນັ້ນ ຄື (໑) ເຈົ້າ (໒) ຂ້າທາດ ເປັນເຈົ້າແລ້ວກັບເປັນຂ້າທາດ ເປັນຂ້າທາດແລ້ວກັບເປັນເຈົ້າ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອັດສະລາຍະນະ ໃນເລື້ອງນີ້ ອັນໃດເປັນກຳລັງ ອັນໃດເປັນຄວາມຍິນດີຂອງພາມທັງຫລາຍຜູ້ກ່າວແລ້ວແນວນີ້ວ່າ "ວັນນະທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ວັນນະອື່ນຊົ່ວ ຯລຯ ເປັນທາຍາດຂອງພົມ"

ອັດສະລາຍະນະມານົບທູນຕອບວ່າ "ທ່ານພຣະໂຄດົມຕັດແນວນັ້ນກໍຈິງ ແຕ່ໃນເລື້ອງນີ້ພາມທັງຫລາຍກໍເຂົ້າໃຈເລື້ອງນັ້ນຢູ່ແນວນີ້ວ່າ "ວັນນະທີ່ປະເສີດທີ່ສຸດຄືພາມ ທໍ່ນັ້ນ ວັນນະອື່ນຊົ່ວ ຯລຯ ເປັນທາຍາດຂອງພົມ"

[໔໐໔] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອັດສະລາຍະນະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າ ແນວໃດ ກະສັດທໍ່ນັ້ນຫຼືທີ່ເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເປັນຜູ້ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດ ພະຍາບາດເປັນມິດສາທິດຖິ ຫລັງຈາກຕາຍແລ້ວຈະເພິ່ງໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກສ່ວນພາມບໍ່ເປັນແນວນັ້ນບໍ?

ແພດທໍ່ນັ້ນບໍ? ຯລຯ

ສູດທໍ່ນັ້ນຫຼືທີ່ເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເປັນຜູ້ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດ ພະຍາບາດ ເປັນມິດສາທິດຖິ ຫລັງຈາກຕາຍແລ້ວຈະເພິ່ງໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ສ່ວນພາມບໍ່ເປັນແນວນັ້ນບໍ?"

ອັດສະລາຍະນະມານົບທູນຕອບວ່າ "ບໍ່ແມ່ນເຊັ່ນນັ້ນ ທ່ານພຣະໂຄດົມ ແມ່ນກະສັດທີ່ເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະເປັນຜູ້ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດພະຍາບາດ ເປັນມິດສາທິດຖິ ຫລັງຈາກຕາຍແລ້ວຈະເພິ່ງໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ

ແມ່ນພາມ ຯລຯ

ແມ່ນແພດ ຯລຯ

ແມ່ນສູດ ຯລຯ

ຂ້າແດ່ ທ່ານພຣະໂຄດົມ ຄວາມຈິງ ແມ່ນວັນນະ ໔ ຈຳພວກ ທີ່ເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເປັນຜູ້ເພ່ງເລັງ ຍາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດພະຍາບາດ ເປັນມິດສາທິດຖິ ຫລັງຈາກຕາຍແລ້ວຈະເພິ່ງໄປເກີດ ໃນ ອະບາຍ ທຸຄະຕິ ວິນິບາດ ນະຣົກ ທັງໝົດ”

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ “ອັດສະລາຍະນະ ໃນເລື້ອງນີ້ ອັນໃດເປັນກຳລັງ ອັນໃດ ເປັນຄວາມຍິນດີຂອງພາມທັງຫລາຍຜູ້ກ່າວແນວນີ້ວ່າ “ວັນນະທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ວັນນະອື່ນຊົ່ວ ຯລຯ ເປັນທາຍາດຂອງພົມ”

ອັດສະລາຍະນະມານົບທູນຕອບວ່າ “ທ່ານພຣະໂຄດົມ ຕັດແນວນັ້ນກໍຈິງ ແຕ່ໃນເລື້ອງນີ້ ພາມທັງຫລາຍກໍເຂົ້າໃຈເລື້ອງນັ້ນຢູ່ແນວນີ້ວ່າ “ວັນນະທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ວັນນະອື່ນຊົ່ວ ຯລຯ ເປັນທາຍາດຂອງພົມ”

[໔໐໕] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ “ອັດສະລາຍະນະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ພາມທໍ່ນັ້ນຫຼືທີ່ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຍາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຫລັງຈາກຕາຍແລ້ວຈະເພິ່ງໄປເກີດໃນສຸຄະຕິໂລກສະຫວັນ ກະສັດບໍ່ເປັນແນວນັ້ນບໍ? ແພດບໍ່ເປັນ ແນວນັ້ນບໍ? ສູດບໍ່ເປັນແນວນັ້ນບໍ?”

ອັດສະລາຍະນະມານົບທູນຕອບວ່າ “ບໍ່ແມ່ນເຊັ່ນນັ້ນ ທ່ານພຣະໂຄດົມ ແມ່ນກະສັດທີ່ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດ ໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າ ຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຍາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຫລັງຈາກສະຫວັນຄົດແລ້ວຈະເພິ່ງໄປເກີດໃນສຸຄະຕິໂລກສະຫວັນ

ແມ່ນພາມ ຯລຯ

ແມ່ນແພດ ຯລຯ

ແມ່ນສູດ ຯລຯ

ຂ້າແດ່ທ່ານພຣະໂຄດົມ ຄວາມຈິງ ແມ່ນວັນນະ ໔ ຈຳພວກ ທີ່ເປັນຜູ້ເວັ້ນຂາດຈາກ

ການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຍາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຫລັງຈາກຕາຍແລ້ວຈະເພິ່ງໄປເກີດໃນສຸຄະຕິໂລກສະຫວັນທັງໝົດ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອັດສະລາຍະນະ ໃນເລື້ອງນີ້ ອັນໃດເປັນກຳລັງ ອັນໃດເປັນຄວາມຍິນດີຂອງພາມຜູ້ກ່າວແນວນີ້ວ່າ "ວັນນະທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ວັນນະອື່ນຊົ່ວ ໆລໆ ເປັນທາຍາດຂອງພົມ"

ອັດສະລາຍະນະມານົບທູນຕອບວ່າ "ທ່ານພຣະໂຄດົມຕັດແນວນີ້ກໍຈິງ ແຕ່ໃນເລື້ອງນີ້ ພາມທັງຫລາຍກໍເຂົ້າໃຈເລື້ອງນັ້ນຢູ່ແນວນີ້ວ່າ "ວັນນະທີ່ປະເສີດທີ່ສຸດຄືພາມ ທໍ່ນັ້ນ ວັນນະອື່ນຊົ່ວ ໆລໆ ເປັນທາຍາດຂອງພົມ"

[໔໐໖] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອັດສະລາຍະນະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໃນປະເທດນີ້ ພາມທໍ່ນັ້ນບໍ? ທີ່ສາມາດຈະເລີນເມດຕາຈິດ ອັນບໍ່ມີເວນ ບໍ່ມີຄວາມບຽດບຽນ ກະສັດ ແພດ ສູດ ບໍ່ສາມາດບໍ?"

ອັດສະລາຍະນະມານົບທູນຕອບວ່າ "ບໍ່ແມ່ນເຊັ່ນນັ້ນ ທ່ານພຣະໂຄດົມ ໃນປະເທດນີ້ ແມ່ນກະສັດກໍສາມາດຈະເລີນເມດຕາຈິດ ອັນບໍ່ມີເວນ ບໍ່ມີຄວາມບຽດບຽນ

ແມ່ນພາມ ໆລໆ

ແມ່ນແພດ ໆລໆ

ແມ່ນສູດ ໆລໆ

ຂ້າແດ່ ທ່ານພຣະໂຄດົມ ຄວາມຈິງໃນປະເທດນີ້ ແມ່ນວັນນະ ໔ ຈຳພວກ ກໍສາມາດຈະເລີນເມດຕາຈິດ ອັນບໍ່ມີເວນ ບໍ່ມີຄວາມບຽດບຽນໄດ້ທັງໝົດ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອັດສະລາຍະນະ ໃນເລື້ອງນີ້ ອັນໃດເປັນກຳລັງ ອັນໃດເປັນຄວາມຍິນດີຂອງພາມທັງຫລາຍຜູ້ກ່າວແນວນີ້ວ່າ "ວັນນະທີ່ປະເສີດທີ່ສຸດຄືພາມ ທໍ່ນັ້ນ ວັນນະອື່ນຊົ່ວ ໆລໆ ເປັນທາຍາດຂອງພົມ"

ອັດສະລາຍະນະມານົບທູນຕອບວ່າ "ທ່ານພຣະໂຄດົມຕັດແນວນັ້ນກໍຈິງ ແຕ່ໃນເລື້ອງນີ້ ພາມທັງຫລາຍກໍເຂົ້າໃຈເລື້ອງນັ້ນຢູ່ແນວນີ້ວ່າ "ວັນນະທີ່ປະເສີດທີ່ສຸດຄືພາມ ທໍ່ນັ້ນ ວັນນະອື່ນຊົ່ວ ໆລໆ ເປັນທາຍາດຂອງພົມ"

[໔໐໗] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອັດສະລາຍະນະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າ ແນວໃດ ພາມທໍ່ນັ້ນຫຼືທີ່ສາມາດຖືເອົາເຄື່ອງທຸກໂຕສຳລັບອາບນ້ຳໄປສູ່ແມ່ນ້ຳແລ້ວລອຍລະອອງທຸລີໄດ້ ກະສັດ ແພດ ສູດ ບໍ່ສາມາດບໍ"

ອັດສະລາຍະນະມານົບທູນຕອບວ່າ "ບໍ່ແມ່ນເຊັ່ນນັ້ນ ທ່ານພຣະໂຄດົມ ແມ່ນກະສັດກໍຍ່ອມສາມາດຖືເອົາເຄື່ອງທຸກໂຕສຳລັບອາບນ້ຳໄປສູ່ແມ່ນ້ຳແລ້ວລອຍລະອອງທຸລີໄດ້

ແມ່ນພາມ ฯລฯ

ແມ່ນແພດ ฯລฯ

ແມ່ນສູດ ฯລฯ

ຂ້າແດ່ ທ່ານພຣະໂຄດົມ ຄວາມຈິງແມ່ນວັນນະ ໔ ຈຳພວກ ກໍຍ່ອມສາມາດຖືເອົາເຄື່ອງທຸກໂຕສຳລັບອາບນ້ຳໄປສູ່ແມ່ນ້ຳແລ້ວລອຍລະອອງທຸລີໄດ້ທັງໝົດ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອັດສະລາຍະນະ ໃນເລື້ອງນີ້ ອັນໃດເປັນກຳລັງອັນໃດເປັນຄວາມຍິນດີຂອງພາມຜູ້ກ່າວແນວນີ້ວ່າ "ວັນນະທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ວັນນະອື່ນຊົ່ວ ฯລฯ ເປັນທາຍາດຂອງພົມ"

ອັດສະລາຍະນະມານົບທູນຕອບວ່າ "ທ່ານພຣະໂຄດົມຕັດແນວນັ້ນກໍຈິງ ແຕ່ໃນເລື້ອງນີ້ພາມທັງຫລາຍກໍເຂົ້າໃຈເລື້ອງນັ້ນຢູ່ແນວນີ້ວ່າ "ວັນນະທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ວັນນະອື່ນຊົ່ວ ฯລฯ ເປັນທາຍາດຂອງພົມ"

[໔໐໘] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອັດສະລາຍະນະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າ ແນວໃດ ພຣະຣາຊາມະຫາກະສັດໃນໂລກນີ້ ຜູ້ໄດ້ຮັບມຸດທາພິເສກອແລ້ວ ຈະເພິ່ງຊຶງເກນບຸຣຸດຜູ້ມີຖານະຕ່າງ ໆ ກັນ ໑໐໐ ຄົນ ໃຫ້ມາປະຊຸມກັນຕັດວ່າ "ມາເທີ້ນທ່ານທັງຫລາຍ ໃນຈຳນວນບຸຣຸດເຫຼົ່ານັ້ນ ບຸຣຸດເຫຼົ່າໃດເກີດຈາກຕະກູນກະສັດ ຕະກູນພາມ ຣາດຊະຕະກູນ ບຸຣຸດເຫຼົ່ານັ້ນຈົ່ງຖືເອົາໄມ້ຈັກ ໄມ້ສາລະ ໄມ້ສົນ ໄມ້ຈັນ ຫຼືໄມ້ທັບທິມ ມາເຮັດເປັນໄມ້ສີໄຟ ແລ້ວສີໃຫ້ເປັນໄຟລຸກສະຫວ່າງແຈ້ງຂຶ້ນ ມາເທີ້ນທ່ານທັງຫລາຍ ໃນຈຳນວນບຸຣຸດ ເຫຼົ່ານັ້ນ ບຸຣຸດເຫຼົ່າໃດເກີດຈາກຕະກູນຈັນທານ ຕະກູນພານ ຕະກູນຊ່າງຈັກສານ ຕະກູນຊ່າງລົດ ຕະກູນຄົນຂົນຂີ້ເຫຍື້ອ ບຸຣຸດເຫຼົ່ານັ້ນຈົ່ງຖືເອົາໄມ້ຮາງໝາ ໄມ້ຮາງໝູ ໄມ້ຮາງຍ້ອມຜ້າ ຫຼື ໄມ້ລະຫຸ່ງມາເຮັດເປັນໄມ້ສີໄຟແລ້ວສີໃຫ້ເປັນໄຟລຸກສະຫວ່າງແຈ້ງຂຶ້ນ

ອັດສະລາຍະນະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໄຟທີ່ບຸຣຸດທັງຫລາຍຜູ້ເກີດຈາກ

ຕະກູນກະສັດ ຕະກູນພາມ ຣາດຊະຕະກູນ ຖືເອົາໄມ້ຈັກ ໄມ້ສາລະ ໄມ້ສົນ ໄມ້ຈັນ ຫຼື ໄມ້ທັບທິມ ມາເຮັດເປັນໄມ້ສີໄຟ ແລ້ວສີໃຫ້ເປັນໄຟລຸກສະຫວ່າງແຈ້ງຂຶ້ນທີ່ນັ້ນ ຫຼື ເປັນໄຟ ມີນ້ຳ ມີສີ ມີແສງສະຫວ່າງ ແລະ ສາມາດເຮັດກິດທີ່ຕ້ອງເຮັດດ້ວຍໄຟນັ້ນໃຫ້ສຳເລັດໄດ້ ສ່ວນໄຟ ທີ່ບຸຣຸດທັງຫລາຍຜູ້ເກີດຈາກຕະກູນຈັນທານ ຕະກູນນາຍພານ ຕະກູນຊ່າງຈັກສານ ຕະກູນຊ່າງລົດ ຕະກູນຄົນຂົນຂີ້ເຫຍື້ອ ຖືເອົາໄມ້ຮາງໝາ ໄມ້ຮາງໝູ ໄມ້ຮາງຍ້ອມຜ້າ ຫຼື ໄມ້ລະຫຸ່ງ ມາເຮັດເປັນໄມ້ສີໄຟ ແລ້ວສີໃຫ້ເປັນໄຟລຸກສະຫວ່າງແຈ້ງຂຶ້ນນັ້ນ ເປັນໄຟບໍ່ມີນ້ຳ ບໍ່ມີສີ ບໍ່ມີແສງສະຫວ່າງ ແລະ ບໍ່ສາມາດເຮັດກິດທີ່ຕ້ອງເຮັດດ້ວຍໄຟນັ້ນໃຫ້ສຳເລັດໄດ້ແມ່ນບໍ?"

ອັດສະລາຍະນະມານົບທູນຕອບວ່າ "ບໍ່ແມ່ນເຊັ່ນນັ້ນ ທ່ານພຣະໂຄດົມ ແມ່ນໄຟທີ່ບຸຣຸດທັງຫລາຍ ຜູ້ເກີດຈາກຕະກູນກະສັດ ຕະກູນພາມ ຣາດຊະຕະກູນ ຖືເອົາໄມ້ຈັກ ໄມ້ສາລະ ໄມ້ສົນ ໄມ້ຈັນ ຫຼື ໄມ້ທັບທິມ ມາເຮັດເປັນໄມ້ສີໄຟ ແລ້ວສີໃຫ້ເປັນໄຟລຸກສະຫວ່າງແຈ້ງຂຶ້ນນັ້ນ ກໍເປັນໄຟ ມີນ້ຳ ມີສີ ມີແສງສະຫວ່າງ ແລະ ສາມາດເຮັດກິດທີ່ຕ້ອງເຮັດດ້ວຍໄຟນັ້ນໃຫ້ສຳເລັດໄດ້ ແມ່ນໄຟ ທີ່ບຸຣຸດທັງຫລາຍຜູ້ເກີດຈາກຕະກູນຈັນທານ ຕະກູນນາຍພານ ຕະກູນຊ່າງຈັກສານ ຕະກູນຊ່າງລົດ ຕະກູນຄົນຂົນຂີ້ເຫຍື້ອ ຖືເອົາໄມ້ຮາງໝາ ໄມ້ຮາງໝູ ໄມ້ຮາງຍ້ອມຜ້າ ຫຼື ໄມ້ລະຫຸ່ງ ມາເຮັດເປັນໄມ້ສີໄຟ ແລ້ວສີໃຫ້ເປັນໄຟລຸກສະຫວ່າງແຈ້ງຂຶ້ນນັ້ນ ກໍເປັນໄຟມີນ້ຳ ມີສີ ມີແສງສະຫວ່າງ ແລະ ສາມາດເຮັດກິດທີ່ຕ້ອງເຮັດດ້ວຍໄຟໃຫ້ສຳເລັດໄດ້ ທ່ານພຣະໂຄດົມ ຄວາມຈິງ ແມ່ນໄຟທຸກຊະນິດກໍເປັນໄຟມີນ້ຳ ມີສີ ມີແສງສະຫວ່າງ ແລະ ສາມາດເຮັດກິດທີ່ຕ້ອງເຮັດດ້ວຍໄຟໃຫ້ສຳເລັດໄດ້ທັງໝົດ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອັດສະລາຍະນະ ໃນເລື້ອງນີ້ ອັນໃດເປັນກຳລັງ ອັນໃດເປັນຄວາມຍິນດີຂອງພາມຜູ້ກ່າວແນວນີ້ວ່າ "ວັນນະທີ່ປະເສີດທີ່ສຸດຄືພາມ ທີ່ນັ້ນ ວັນນະອື່ນຊົ່ວ ວັນນະທີ່ຂາວຄືພາມທີ່ນັ້ນ ວັນນະອື່ນດຳ ພາມທີ່ນັ້ນບໍລິສຸດ ຜູ້ທີ່ບໍ່ແມ່ນພາມ ບໍ່ບໍລິສຸດພາມທີ່ນັ້ນເປັນບຸດ ເປັນໂອຣົດ ເກີດຈາກໂອດຂອງພົມ ເກີດຈາກພົມ ພົມເປັນຜູ້ສ້າງຂຶ້ນ ເປັນທາຍາດຂອງພົມ"

ອັດສະລາຍະນະມານົບທູນຕອບວ່າ "ທ່ານພຣະໂຄດົມຕັດແນວນັ້ນກໍຈິງ ແຕ່ໃນເລື້ອງນີ້ ພາມທັງຫລາຍກໍເຂົ້າໃຈເລື້ອງນັ້ນຢູ່ແນວນີ້ວ່າ "ວັນນະທີ່ປະເສີດທີ່ສຸດຄືພາມ ທີ່ນັ້ນ ວັນນະອື່ນຊົ່ວ ຯລຯ ເປັນທາຍາດຂອງພົມ"

[໔໐໙] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອັດສະລາຍະນະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຂັດຕິຍະກຸມານໃນໂລກນີ້ ສຳເລັດການຢູ່ຮ່ວມກັບນາງພຣາມມະນີ ຍ້ອນອາໄສການຢູ່ຮ່ວມເປັນຜົວເມຍກັນຂອງຄົນທັງສອງນັ້ນ ຈຶ່ງເກີດບຸດຂຶ້ນ ບຸດທີ່ເກີດຈາກນາງ ພຣາມມະນີກັບຂັດຕິຍະກຸມານນັ້ນ ເຊິ່ງຄືມານດາກໍດີ ຄືບິດາກໍດີ ຄວນຈະຮຽກວ່າ "ກະສັດຫຼືພາມ"

ອັດສະລາຍະນະມານົບທູນຕອບວ່າ "ຂ້າແດ່ ທ່ານພຣະໂຄດົມ ບຸດທີ່ເກີດຈາກນາງພ ຣາມມະນີ ກັບຂັດຕິຍະກຸມານນັ້ນ ເຊິ່ງຄືມານດາກໍດີ ຄືບິດາກໍດີ ຄວນຈະຮຽກວ່າ "ກະສັດ ກໍໄດ້ ພາມກໍໄດ້"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ພຣາມມະໜະກຸມານໃນໂລກນີ້ເພິ່ງສຳເລັດການຢູ່ ຮ່ວມກັບນາງກະສັດ ຍ້ອນອາໄສການຢູ່ຮ່ວມເປັນຜົວເມຍກັນຂອງຄົນທັງສອງນັ້ນ ບຸດຈຶ່ງເກີດ ຂຶ້ນ ບຸດທີ່ເກີດຈາກນາງກະສັດກັບພຣາມມະໜະກຸມານນັ້ນ ເຊິ່ງຄືມານດາກໍດີ ຄືບິດາກໍດີ ຄວນ ຈະຮຽກວ່າ "ກະສັດຫຼືພາມ"

"ຂ້າແດ່ທ່ານພຣະໂຄດົມ ບຸດຜູ້ເກີດຈາກນາງກະສັດກັບພຣາມມະໜະກຸມານນັ້ນ ເຊິ່ງຄື ມານດາກໍດີ ຄືບິດາກໍດີ ຄວນຈະຮຽກວ່າ "ກະສັດກໍໄດ້ ພາມກໍໄດ້"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໃນໂລກນີ້ເຂົາເພິ່ງປະສົມແມ່ມ້າກັບພໍ່ລາ ຍ້ອນ ອາໄສການປະສົມແມ່ມ້າກັບພໍ່ລານັ້ນຈຶ່ງເກີດລູກມ້າ (ລໍ່) ຂຶ້ນ ລູກມ້າທີ່ເກີດຈາກແມ່ມ້າກັບພໍ່ລາ ເຊິ່ງຄືແມ່ກໍດີ ຄືພໍ່ກໍດີ ຄວນຈະຮຽກວ່າ "ມ້າຫຼືລາ"

"ຂ້າແດ່ ທ່ານພຣະໂຄດົມ ລູກປະສົມນັ້ນຍ່ອມເປັນມ້າອັດສະດອນ ຂ້າແດ່ ທ່ານພຣະໂຄ ດົມເລື້ອງຂອງສັດນີ້ຂ້າພຣະອົງເຫັນວ່າຕ່າງກັນ (ແຕ່ຕາມໄນຕົ້ນ) ສຳລັບເລື້ອງຂອງມະນຸດ ເຫຼົ່າ ນັ້ນ ຂ້າພຣະອົງເຫັນວ່າບໍ່ຕ່າງກັນ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໃນໂລກນີ້ມີມານົບ ໔ ຄົນເປັນພີ່ນ້ອງຮ່ວມທ້ອງ ດຽວກັນ ຄົນໜຶ່ງເປັນຄົນສຶກສາຮ່ຳຮຽນ ອາຈານໄດ້ແນະນຳ ຄົນໜຶ່ງບໍ່ໄດ້ສຶກສາຮ່ຳຮຽນ ອາ ຈານບໍ່ໄດ້ແນະນຳ ພາມທັງຫລາຍເພິ່ງເຊື້ອເຊີນຄົນໃດໃນ ໔ ຄົນນີ້ໃຫ້ບໍຣິໂພກກ່ອນ ໃນການ ລ້ຽງຂອງຜູ້ມີສັດທາກໍດີ ໃນການລ້ຽງເພື່ອເປັນບັນນາການກໍດີ ໃນການລ້ຽງເພື່ອບູຊາຍັນກໍດີ ໃນ ການລ້ຽງເພື່ອຕ້ອນຮັບແຂກກໍດີ"

"ຂ້າແດ່ ທ່ານພຣະໂຄດົມ ໃນ ໔ ຄົນນີ້ ພາມທັງຫລາຍເພິ່ງເຊີນມານົບຜູ້ສຶກສາ ຮ່ຳຮຽນ ຜູ້ທີ່ອາຈານໄດ້ແນະນຳໃຫ້ບໍຣິໂພກກ່ອນ ໃນການລ້ຽງຂອງຜູ້ມີສັດທາກໍດີ ໃນການລ້ຽງ ເພື່ອເປັນບັນນາການກໍດີ ໃນການລ້ຽງເພື່ອບູຊາຍັນກໍດີ ໃນການລ້ຽງເພື່ອຕ້ອນຮັບແຂກກໍດີ ຂ້າ ແດ່ທ່ານພຣະໂຄດົມ ຂອງທີ່ໃຫ້ໃນຜູ້ບໍ່ໄດ້ສຶກສາຮ່ຳຮຽນ ຜູ້ທີ່ອາຈານບໍ່ໄດ້ແນະນຳ ຈັກມີຜົນຫຼາຍ ໄດ້ແນວໃດນໍ?"

"ອັດສະລາຍະນະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໃນໂລກນີ້ມີມານົບ ໔ ຄົນເປັນ ພີ່ນ້ອງຮ່ວມທ້ອງດຽວກັນ ຄົນໜຶ່ງເປັນຄົນສຶກສາຮ່ຳຮຽນ ອາຈານໄດ້ແນະນຳ ແຕ່ເປັນຄົນທຸສິນ

ມີບາບທຳ ຄົນໜຶ່ງບໍ່ໄດ້ສຶກສາຮ່ຳຮຽນ ອາຈານບໍ່ໄດ້ແນະນຳ ແຕ່ເປັນຄົນມີສິນ ມີກັນລະຍານະທຳ ພາມທັງຫລາຍຈະເພິ່ງເຊື້ອເຊີນຄົນໃດໃນ ໔ ຄົນນີ້ໃຫ້ບໍຣິໂພກກ່ອນ ໃນການລ້ຽງຂອງຜູ້ມີສັດທາກໍດີ ໃນການລ້ຽງເພື່ອເປັນບັນນາການກໍດີ ໃນການລ້ຽງເພື່ອບູຊາຍັນກໍດີ ໃນການລ້ຽງເພື່ອຕ້ອນຮັບແຂກກໍດີ"

ອັດສະລາຍະນະມານົບຂາບທູນວ່າ "ຂ້າແດ່ ທ່ານພຣະໂຄດົມ ໃນ ໔ ຄົນນີ້ ພາມທັງຫລາຍເພິ່ງເຊີນມານົບຜູ້ບໍ່ໄດ້ສຶກສາຮ່ຳຮຽນ ຜູ້ທີ່ອາຈານບໍ່ໄດ້ແນະນຳ ແຕ່ເປັນຄົນມີສິນ ມີກັນລະຍານະທຳໃຫ້ບໍຣິໂພກກ່ອນ ໃນການລ້ຽງຂອງຜູ້ມີສັດທາກໍດີ ໃນການລ້ຽງ ເພື່ອເປັນບັນນາການກໍດີ ໃນການລ້ຽງເພື່ອບູຊາຍັນກໍດີ ໃນການລ້ຽງເພື່ອຕ້ອນຮັບແຂກກໍດີ ຂ້າແດ່ ທ່ານພຣະໂຄດົມ ຂອງທີ່ໃຫ້ໃນບຸກຄົນຜູ້ທຸສິນ ມີບາບທຳ ຈັກມີຜົນຫຼາຍໄດ້ແນວໃດນໍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອັດສະລາຍະນະ ແຕ່ກ່ອນທ່ານໄດ້ອ້າງກຳເນີແລ້ວກໍອ້າງເລື້ອງມົນ ອ້າງເລື້ອງມົນແລ້ວກໍອ້າງເລື້ອງຕະບະ ອ້າງເລື້ອງຕະບະແລ້ວກໍມາເວົ້າເລື້ອງຄວາມບໍລິສຸດທີ່ທົ່ວໄປແກ່ວັນນະ ໔ ຈຳພວກ ເຊິ່ງເຮົາບັນຍັດໄວ້"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ອັດສະລາຍະນະມານົບກໍນັ່ງນິ່ງ ເກີ້ເຂີນ ຄໍຕົກ ກົ້ມໜ້າ ຊົບເຊົາ ໝົດປະຕິພານະ

## ວັນນະ ໔ ຈຳພວກໃນອະດີດ

[໔໑໐] ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າອັດສະລາຍະນະມານົບນັ່ງນິ່ງ ເກີ້ເຂີນ ຄໍຕົກ ກົ້ມໜ້າ ຊົບເຊົາ ໝົດປະຕິພານ ຈຶ່ງໄດ້ຕັດກັບອັດສະລາຍະນະມານົບ ວ່າ

"ອັດສະລາຍະນະ ເລື້ອງເຄີຍມີມາແລ້ວ ພາມລືສີ ໗ ຕົນ ມາປະຊຸມກັນທີ່ຕູບ ມຸງບັງດ້ວຍໃບໄມ້ໃນແຄມປ່າ ເກີດມີທິດຖິຊົ່ວເຫັນຢູ່ແນວນັ້ນວ່າ "ວັນນະທີ່ປະເສີດທີ່ສຸດຄືພາມ ທໍ່ນັ້ນ ວັນນະອື່ນຊົ່ວ ຯລຯ ເປັນທາຍາດຂອງພົມ"

ອະສິຕະເທວະລະລືສີໄດ້ສະດັບວ່າ "ໄດ້ຮູ້ວ່າ ພາມລືສີ ໗ ຕົນມາປະຊຸມກັນທີ່ຕູບມຸງບັງດ້ວຍໃບໄມ້ໃນແຄມປ່າ ເກີດມີທິດຖິຊົ່ວເຫັນຢູ່ແນວນັ້ນວ່າ "ວັນນະທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ຯລຯ ເປັນທາຍາດຂອງພົມ"

ລຳດັບນັ້ນ ອະສິຕະເທວະລະລືສີແຖຜົມແລະໜວດ ນຸ່ງຫົ່ມຜ້າສີແດງອ່ອນໃສ່ເກີບ ໔ ຊັ້ນ ຖືໄມ້ການເທົ້າລ່ຽມຄຳໄປຜາກົດໃນບໍລິເວນສາລາຂອງພາມລືສີ ໗ ຕົນ ຄັ້ງນັ້ນແລ ອະສິຕະເທວະລະລືສີເມື່ອຍ່າງໄປມາຢູ່ໃນບໍລິເວນສາລາຂອງພາມລືສີທັງ ໗ ຕົນ ໄດ້ກ່າວແນວນີ້ວ່າ "ເອີ ທ່ານພາມລືສີເຫລົ່ານີ້ໄປໄສກັນໝົດ ເອີ ທ່ານພາມ ລືສີເຫລົ່ານີ້ໄປໄສກັນໝົດແລ້ວ"

ລຳດັບນັ້ນ ພາມລືສີ ໗ ຕົນ ໄດ້ຄິດວ່າ "ໃຜນໍ່ນີ້ ຍ່າງໄປມາຄືເດັກຊາວບ້ານ ໃນບໍລິເວນສາລາຂອງພາມລືສີ ໗ ຕົນ ກ່າວແນວນີ້ວ່າ "ເອີ ທ່ານພາມລືສີເຫລົ່ານີ້ໄປໄສກັນໝົດ ເອີ ທ່ານພາມລືສີເຫລົ່ານີ້ໄປໄສກັນໝົດ" ເອົາລະ ເຮົາທັງຫລາຍຈັກສາບແຊ່ງມັນ"

ລຳດັບນັ້ນ ພາມລືສີ ໗ ຕົນ ກໍພາກັນສາບແຊ່ງອະສິຕະເທວະລະລືສີວ່າ "ເປັນຂີ້ເທົ່າເທີ້ນຄົນຖ່ອຍ ເປັນຂີ້ເທົ່າເທີ້ນຄົນຖ່ອຍ" ພາມລືສີ ໗ ຕົນ ພາກັນສາບແຊ່ງອະສິຕະເທວະລະລືສີດ້ວຍປະການໃດ ໆ ອະສິຕະເທວະລະລືສີກັບເປັນຜູ້ມີຮູບງາມກວ່າ ເປັນຜູ້ໜ້າເບິ່ງກວ່າ ແລະເປັນຜູ້ໜ້າເຫຼື້ອມໃສກວ່າ ດ້ວຍປະການນັ້ນ ໆ

ຄັ້ງນັ້ນແລ ພາມລືສີ ໗ ຕົນ ໄດ້ຄິດວ່າ "ຕະບະຂອງເຮົາທັງຫລາຍເປົ່າປະໂຫຍດ ພົມມະຈັນຂອງເຮົາບໍ່ມີຜົນ ດ້ວຍວ່າແຕ່ກ່ອນເຮົາທັງຫລາຍສາບແຊ່ງຜູ້ໃດວ່າ "ເປັນຂີ້ເທົ່າເທີ້ນຄົນຖ່ອຍ ເປັນຂີ້ເທົ່າເທີ້ນຄົນຖ່ອຍ" ຜູ້ນັ້ນ ລາງຄົນກໍເປັນເທົ່າເປັນຈຸນ ແຕ່ຜູ້ນີ້ເຮົາທັງຫລາຍຍິ່ງສາບແຊ່ງ ດ້ວຍປະການໃດ ໆ ເຂົາກັບເປັນຜູ້ມີຮູບງາມຍິ່ງຂຶ້ນ ເປັນຜູ້ໜ້າເບິ່ງຍິ່ງຂຶ້ນ ແລະເປັນຜູ້ໜ້າເຫຼື້ອມໃສຍິ່ງຂຶ້ນ ດ້ວຍປະການນັ້ນ ໆ"

ອະສິຕະເທວະລະລືສີກ່າວວ່າ "ຕະບະຂອງທ່ານຜູ້ຈະເລີນທັງຫລາຍ ເປົ່າປະໂຫຍດກໍເປັນໄປບໍ່ໄດ້ ພົມມະຈັນຂອງທ່ານຜູ້ຈະເລີນທັງຫລາຍບໍ່ມີຜົນກໍເປັນໄປບໍ່ໄດ້ ເຊີນທ່ານຜູ້ຈະເລີນທັງຫລາຍ ຈົ່ງລະຄວາມຄິດປະທຸດສະຮ້າຍໃນເຮົາສາເທີ້ນ"

ພາມລືສີ ກ່າວວ່າ "ພວກເຮົາຍອມສະລະຄວາມຄິດປະທຸດສະຮ້າຍ ທ່ານເປັນ ໃຜນໍ?"

ອະສິຕະເທວະລະລືສີ ກ່າວວ່າ "ທ່ານຜູ້ຈະເລີນທັງຫລາຍໄດ້ຍິນຊື່ ອະສິຕະເທວະລະລືສີມາ ແດ່ບໍ?"

ພາມລືສີ ກ່າວວ່າ "ທ່ານຜູ້ຈະເລີນ ເຮົາທັງຫລາຍເຄີຍໄດ້ຍິນຢູ່"

ອະສິຕະເທວະລະລືສີ ກ່າວວ່າ "ທ່ານຜູ້ຈະເລີນທັງຫລາຍ ເຮົານີ້ແລ ຄືອະສິຕະເທວະລະລືສີ ຕົນນັ້ນ"

ອັດສະລາຍະນະ ລຳດັບນັ້ນແລ ພາມລືສີ ໗ ຕົນ ພາກັນເຂົ້າໄປຫາອະສິຕະເທວະລະລືສີ ເພື່ອຈະໄຫວ້

[໔໑໑] ອັດສະລາຍະນະ ຄັ້ງນັ້ນ ອະສິຕະເທວະລະລືສີໄດ້ກ່າວກັບພາມລືສີ ທັງ ໗ ຕົນວ່າ "ທ່ານຜູ້ຈະເລີນທັງຫລາຍ ຂ້າພະເຈົ້າໄດ້ສະດັບຂ່າວນີ້ມາວ່າ "ໄດ້ຮູ້ວ່າ ພາມລືສີ ໗ ຕົນມາປະຊຸມກັນໃນຕູບມຸງບັງດ້ວຍໃບໄມ້ໃນແຄມປ່າ ແລ້ວເກີດມີທິດຖິ ຊົ່ວເຫັນຢູ່ແນວນັ້ນວ່າ "ວັນນະ

ທີ່ປະເສີດທີ່ສຸດຄືພາມທໍ່ນັ້ນ ວັນນະອື່ນຊົ່ວ ວັນໃນທີ່ຂາວຄືພາມທໍ່ນັ້ນ ວັນນະອື່ນດຳ ພາມທໍ່ນັ້ນບໍລິສຸດ ຜູ້ທີ່ບໍ່ແມ່ນພາມບໍ່ບໍລິສຸດ ພາມທໍ່ນັ້ນເປັນບຸດ ເປັນໂອຣົດ ເກີດຈາກໂອດຂອງພົມ ເກີດຈາກພົມ ພົມເປັນຜູ້ສ້າງຂຶ້ນ ເປັນທາຍາດຂອງພົມ ຈິງບໍ?”

ພາມລືສີທັງ ໆ ຕົນ ຕອບວ່າ “ຈິງ ທ່ານຜູ້ຈະເລີນ”

ອະສິຕະເທວະລະລີສີຖາມວ່າ “ທ່ານຜູ້ຈະເລີນທັງຫລາຍຮູ້ບໍວ່າ “ມານດາບັງເກີດຫົວໄດ້ແຕ່ງງານກັບພາມທໍ່ນັ້ນ ບໍ່ໄດ້ແຕ່ງງານກັບຊາຍຜູ້ບໍ່ແມ່ນພາມເລີຍ”

“ບໍ່ຮູ້ເລີຍ ທ່ານຜູ້ຈະເລີນ”

“ທ່ານຜູ້ຈະເລີນທັງຫລາຍຮູ້ບໍວ່າ “ມານດາຂອງມານດາບັງເກີດຫົວຕະຫຼອດ ໆ ຊົ່ວໂຄດຊົ່ວຍ່າຍາຍຂອງຝ່າຍມານດາ ໄດ້ແຕ່ງງານກັບພາມທໍ່ນັ້ນ ບໍ່ໄດ້ແຕ່ງງານກັບຊາຍຜູ້ບໍ່ແມ່ນ ພາມເລີຍ”

“ບໍ່ຮູ້ເລີຍ ທ່ານຜູ້ຈະເລີນ”

“ທ່ານຜູ້ຈະເລີນທັງຫລາຍຮູ້ບໍວ່າ “ບິດາບັງເກີດຫົວໄດ້ແຕ່ງງານກັບນາງພຣາມມະນີ ທໍ່ນັ້ນ ບໍ່ໄດ້ແຕ່ງງານກັບຍິງຜູ້ບໍ່ແມ່ນນາງພຣາມມະນີເລີຍ”

“ບໍ່ຮູ້ເລີຍ ທ່ານຜູ້ຈະເລີນ”

“ທ່ານຜູ້ຈະເລີນທັງຫລາຍຮູ້ບໍວ່າ “ບິດາຂອງບິດາບັງເກີດຫົວຕະຫຼອດ ໆ ຊົ່ວໂຄດ ຊົ່ວບັນພະບຸລຸດຕາຂອງຝ່າຍບິດາ ໄດ້ແຕ່ງງານກັບນາງພຣາມມະນີທໍ່ນັ້ນ ບໍ່ໄດ້ແຕ່ງງານກັບຍິງຜູ້ ບໍ່ແມ່ນນາງພຣາມມະນີເລີຍ”

“ບໍ່ຮູ້ເລີຍ ທ່ານຜູ້ຈະເລີນ”
“ທ່ານຜູ້ຈະເລີນທັງຫລາຍຮູ້ບໍວ່າ ການຖືກຳເນີດໃນທ້ອງມີໄດ້ດ້ວຍອາການແນວໃດ”
“ທ່ານຜູ້ຈະເລີນ ຂ້າພະເຈົ້າທັງຫລາຍຮູ້ວ່າ “ການຖືກຳເນີດໃນທ້ອງຍ່ອມມີໄດ້ ຄື

໑. ມານດາບິດາຢູ່ຮ່ວມກັນ
໒. ມານດາມີຣະດູ
໓. ຄັນທັບພະຜາກົດ ສັນໃດ

ຍ້ອນປັດໄຈ ໓ ປະການນີ້ ປະຊຸມພ້ອມກັນ ການຖືກຳເນີດໃນທ້ອງຍ່ອມມີໄດ້ ສັນນັ້ນ”
“ທ່ານຜູ້ຈະເລີນທັງຫລາຍຮູ້ບໍ ວ່າ “ຖ້າຈັ່ງຊັ້ນ ສັດທີ່ເກີດໃນທ້ອງເພິ່ງເປັນກະສັດເປັນ

ພາມ ເປັນແພດ ຫຼື ເປັນສູດ?"

"ຂ້າພະເຈົ້າທັງຫລາຍ ບໍ່ຮູ້ເລີຍ ທ່ານຜູ້ຈະເລີນ"

ອະສິຕະເທວະລະລືສີຖາມວ່າ "ເມື່ອເປັນເຊັ່ນນັ້ນ ທ່ານຜູ້ຈະເລີນທັງຫລາຍຮູ້ບໍວ່າ "ທ່ານທັງຫລາຍເປັນພວກໃດ?"

ພາມລືສີທັງ ໆ ຕົນຕອບວ່າ "ທ່ານຜູ້ຈະເລີນ ເມື່ອເປັນເຊັ່ນນັ້ນ ຂ້າພະເຈົ້າທັງຫລາຍບໍ່ຮູ້ເລີຍວ່າ "ຂ້າພະເຈົ້າທັງຫລາຍເປັນພວກໃດ?"

ອັດສະລາຍະນະ ພາມລືສີ ໆ ຕົນນັ້ນ ຖືກອະສິຕະເທວະລະລືສີຊັກຖາມແລ້ວ ໄລ່ລຽງໄຕ່ຖາມ ໃນວາທະຜາຮົບຊາດກຳເນີດຂອງຕົນກໍຕອບບໍ່ໄດ້ ບັດນີ້ ທ່ານຖືກເຮົາຊັກຖາມແລ້ວໄລ່ລຽງ ໄຕ່ຖາມ ໃນວາທະຜາຮົບຊາດກຳເນີດຂອງຕົນ ຈະຕອບໄດ້ແນວໃດ ທ່ານເປັນສິດມີອາຈານແຕ່ຍັງຮູ້ບໍ່ໝົດ ເປັນແຕ່ຖືທັບພີທໍ່ນັ້ນ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ອັດສະລາຍະນະມານົບໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ "ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ໆລໆ ຂໍທ່ານພຣະໂຄດົມໂຜດຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" ດັ່ງນີ້ແລ

**ອັດສະລາຍະນະສູດທີ່ ໓ ຈົບ**

# ໔. ໂຄຕະມຸຂະສູດ

## ວ່າດ້ວຍພາມຊື່ໂຄຕະມຸຂະ

[໔໑໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ທ່ານພຣະອຸເທນຢູ່ທີ່ເຂມິຍະອຳພະວັນ ເຂດນະຄອນພາຣານະສີ ສະໄໝນັ້ນພາມຊື່ໂຄຕະມຸຂະໄດ້ໄປນະຄອນພາຣານະສີ ດ້ວຍວຽກງານບາງຢ່າງ ຄັ້ງນັ້ນແລ ໂຄຕະມຸຂະພາມ ຍ່າງທ່ຽວຫລິ້ນຢູ່ ໄດ້ເຂົ້າໄປສູ່ເຂມິຍະອຳພະວັນ ສະໄໝນັ້ນ ທ່ານພຣະອຸເທນຍ່າງ ຈົງກົມຢູ່ໃນບ່ອນກາງແຈ້ງ ໂຄຕະມຸຂະພາມເຂົ້າໄປຫາທ່ານພຣະອຸເທນຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຍ່າງຈົງກົມຕາມທ່ານພຣະອຸເທນຜູ້ກຳລັງຍ່າງຈົງກົມຢູ່ ໄດ້ກ່າວແນວນີ້ວ່າ "ສະມະນະຜູ້ຈະເລີນ ການບວດທີ່ຖືກຕ້ອງບໍ່ມີ ໃນການບວດນີ້ຂ້າພະເຈົ້າມີຄວາມເຫັນແນວນີ້ ຍ້ອນໃນການບວດນີ້ບັນດິດທັງຫລາຍເຊັ່ນທ່ານກໍຍັງບໍ່ເຫັນທຳ"

ເມື່ອໂຄຕະມຸຂະພາມກ່າວແນວນີ້ແລ້ວ ທ່ານພຣະອຸເທນຈຶ່ງລົງຈາກທີ່ຈົງກົມ ເຂົ້າໄປສູ່ວິຫານແລ້ວນັ່ງເທິງອາສະນະທີ່ປູລາດໄວ້ ແມ່ນໂຄຕະມຸຂະພາມກໍລົງຈາກທີ່ຈົງກົມເຂົ້າໄປສູ່ວິຫານແລ້ວຢືນຢູ່ທີ່ທີ່ສົມຄວນ ທ່ານພຣະອຸເທນໄດ້ກ່າວກັບໂຄຕະມຸຂະພາມ ວ່າ "ພາມ ອາສະນະມີຢູ່ ຖ້າທ່ານປາຖະໜາກໍເຊີນນັ່ງລົງເທີ້ນ"

ໂຄຕະມຸຂະພາມກ່າວວ່າ "ຂ້າພະເຈົ້າຖ້າການເຊື້ອເຊີນຂອງທ່ານອຸເທນຢູ່ຈຶ່ງຍັງ ບໍ່ນັ່ງ ຍ້ອນຄົນເຊັ່ນຂ້າພະເຈົ້າບໍ່ມີໃຜເຊື້ອເຊີນກ່ອນແລ້ວ ຈະເພິ່ງສຳຄັນການນັ່ງເທິງອາສະນະທີ່ຄວນນັ່ງກໍເບິ່ງຈັ່ງໃດຢູ່"

ລຳດັບນັ້ນແລ ໂຄຕະມຸຂະພາມເລືອກນັ່ງແລ້ວ ໃນທີ່ສົມຄວນທີ່ໃດທີ່ໜຶ່ງເຊິ່ງຕ່ຳກວ່າ ແລ້ວໄດ້ກ່າວກັບທ່ານພຣະອຸເທນວ່າ "ສະມະນະຜູ້ຈະເລີນ ການບວດທີ່ຖືກຕ້ອງບໍ່ມີ ໃນການບວດນີ້ຂ້າພະເຈົ້າມີຄວາມເຫັນແນວນີ້ ຍ້ອນໃນການບວດນີ້ບັນດິດທັງຫລາຍເຊັ່ນທ່ານກໍຍັງບໍ່ເຫັນທຳ"

ທ່ານພຣະອຸເທນກ່າວວ່າ "ພາມ ຖ້າທ່ານຈະເພິ່ງຍອມຮັບຄຳທີ່ຄວນຍອມຮັບ ແລະເພິ່ງຄັດຄ້ານຄຳທີ່ຄວນຄັດຄ້ານຂອງເຮົາ ອັນໜຶ່ງ ທ່ານຍັງບໍ່ເຂົ້າໃຈເນື້ອຄວາມແຫ່ງພາສິດໃດ ກໍຄວນຊັກຖາມເຮົາໃນພາສິດນັ້ນໃຫ້ຍິ່ງຂຶ້ນໄປວ່າ "ທ່ານອຸເທນ ພາສິດນີ້ເປັນແນວໃດ? ເນື້ອຄວາມແຫ່ງພາສິດນີ້ເປັນແນວໃດ?" ຍ້ອນເຮັດແນວນີ້ ເຮົາທັງສອງຈະເພິ່ງມີການສົນທະນາປາໄສກັນໃນເລື້ອງນີ້ໄດ້"

ໂຄຕະມຸຂະພາມກ່າວວ່າ "ຂ້າພະເຈົ້າຈັກຍອມຮັບຄຳທີ່ຄວນຍອມຮັບ ແລະຈັກຄັດຄ້ານຄຳທີ່ຄວນຄັດຄ້ານຂອງທ່ານອຸເທນ ອັນໜຶ່ງ ຂ້າພະເຈົ້າບໍ່ຮູ້ເນື້ອຄວາມແຫ່ງພາສິດໃດຂອງທ່ານອຸເທນ ຂ້າພະເຈົ້າຈັກຊັກຖາມທ່ານອຸເທນໃນພາສິດນັ້ນໃຫ້ຍິ່ງຂຶ້ນໄປວ່າ "ທ່ານອຸເທນ ພາສິດນີ້ເປັນແນວໃດ? ເນື້ອຄວາມແຫ່ງພາສິດນີ້ເປັນແນວໃດ?" ຍ້ອນເຮັດແນວນີ້ ເຮົາທັງສອງຈຶ່ງສົນທະນາປາໄສກັນໃນເລື້ອງນີ້ເທີ້ນ"

## ບຸກຄົນ ໔ ປະເພດ

[໔໑໓] ທ່ານພຣະອຸເທນກ່າວວ່າ "ພາມ ບຸກຄົນ ໔ ປະເພດນີ້ ມີຜາກົດຢູ່ໃນໂລກ

ບຸກຄົນ ໔ ປະເພດ ໃດແດ່

ຄື ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ

໒. ເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ
໓. ເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະ ເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ
໔. ເປັນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະ ເປັນຜູ້ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ

ບຸກຄົນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນຜູ້ບໍ່ຫິວ ດັບຮ້ອນ ເຢັນໃຈ ມີຕົນອັນປະເສີດສະເຫວີຍສຸກຢູ່ໃນປັດຈຸບັນ

ພາມ ບັນດາບຸກຄົນ ໔ ປະເພດນີ້ ທ່ານຖືກໃຈບຸກຄົນຈຳພວກໃດນໍ?"

ໂຄຕະມຸຂະພາມກ່າວວ່າ "ທ່ານອຸເທນ ຂ້າພະເຈົ້າບໍ່ພໍໃຈບຸກຄົນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ

ຂ້າພະເຈົ້າບໍ່ພໍໃຈບຸກຄົນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ

ຂ້າພະເຈົ້າບໍ່ພໍໃຈບຸກຄົນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ

ຂ້າພະເຈົ້າພໍໃຈບຸກຄົນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ ເດືອດຮ້ອນ (ຍ້ອນ) ບຸກຄົນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນນັ້ນ ເປັນຜູ້ບໍ່ຫິວ ດັບຮ້ອນ ເຢັນໃຈ ມີຕົນອັນປະເສີດ ສະເຫວີຍສຸກຢູ່ໃນປັດຈຸບັນ"

"ພາມ ຍ້ອນເຫດໃດນໍ ທ່ານຈຶ່ງບໍ່ພໍໃຈບຸກຄົນ ໓ ປະເພດນີ້"

"ທ່ານອຸເທນ ບຸກຄົນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ຊື່ວ່າເຮັດຕົນເຊິ່ງຮັກສຸກກຽດຊັງທຸກໃຫ້ເດືອດຮ້ອນ ໃຫ້ຮ້ອນຮຸ່ມ ຍ້ອນເຫດນີ້ ຂ້າພະເຈົ້າຈຶ່ງ ບໍ່ພໍໃຈບຸກຄົນນີ້

ຝ່າຍບຸກຄົນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ຊື່ວ່າເຮັດຜູ້ອື່ນເຊິ່ງຮັກສຸກກຽດຊັງທຸກໃຫ້ເດືອດຮ້ອນ ໃຫ້ຮ້ອນຮຸ່ມ ຍ້ອນເຫດນີ້ ຂ້າພະເຈົ້າຈຶ່ງ ບໍ່ພໍໃຈບຸກຄົນນີ້

ສ່ວນບຸກຄົນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະ ເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ຊື່ວ່າເຮັດຕົນເອງ ແລະຜູ້ອື່ນເຊິ່ງຮັກສຸກກຽດຊັງທຸກໃຫ້ເດືອດຮ້ອນ ໃຫ້ຮ້ອນຮົນ ຍ້ອນເຫດນີ້ ຂ້າພະເຈົ້າຈຶ່ງບໍ່ພໍໃຈບຸກຄົນນີ້

ແຕ່ບຸກຄົນໃດ ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ບຸກຄົນນັ້ນ ຊື່ວ່າບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນຜູ້ບໍ່ຫິວ ດັບຮ້ອນ ເຢັນໃຈ ມີຕົນອັນປະເສີດສະເຫວີຍສຸກຢູ່ໃນປັດຈຸບັນ ຊື່ວ່າບໍ່ເຮັດຕົນ ແລະ ຜູ້ອື່ນເຊິ່ງຮັກສຸກກຽດຊັງທຸກໃຫ້ເດືອດຮ້ອນ ໃຫ້ຮ້ອນຮຸ່ມ ຍ້ອນເຫດນີ້ ຂ້າພະເຈົ້າຈຶ່ງພໍໃຈບຸກຄົນນີ້"

## ບໍລິສັດ ໘ ຈຳພວກ

[໔໑໔] ທ່ານພຣະອຸເທນກ່າວວ່າ "ພາມ ບໍລິສັດມີ ໘ ຈຳພວກ

ບໍລິສັດ ໘ ຈຳພວກ ໃດແດ່?ກ

ຄື ບໍລິສັດລາງພວກໃນໂລກນີ້

໑. ມີຄວາມກຳໜັດຍິນດີເມື່ອມີຕ່າງຫູແກ້ວມະນີ ຈຶ່ງສະແຫວງຫາບຸດພັນລະຍາ ຂ້າທາດ ຍິງ ຂ້າທາດຊາຍ ນາ ສວນ ຄຳແລະເງິນ

໘. ບໍ່ມີຄວາມກຳໜັດຍິນດີເມື່ອມີຕ່າງຫູແກ້ວມະນີ ກໍລະຖິ້ມບຸດ ພັນລະຍາ ຂ້າທາດຍິງ ຂ້າທາດຊາຍ ນາ ສວນ ຄຳແລະເງິນ ແລ້ວອອກຈາກເຮືອນບວດເປັນບັນພະຊິດ

ບຸກຄົນໃດບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະ ເປັນຜູ້ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ບຸກຄົນນັ້ນ ຊື່ວ່າບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນນັ້ນ ເປັນຜູ້ບໍ່ຫິວ ດັບຮ້ອນ ເຢັນໃຈ ມີຕົນອັນປະເສີດສະເຫວີຍສຸກຢູ່ໃນປັດຈຸບັນ

ພາມ ທ່ານເຫັນບຸກຄົນຢ່າງໃດໃນບໍລິສັດໃດຫຼາຍ ຄືໃນບໍລິສັດຜູ້ກຳໜັດຍິນດີ ໃນແກ້ວມະນີແລະກຸນທົນ ສະແຫວງຫາບຸດ ພັນລະຍາ ຂ້າທາດຍິງ ຂ້າທາດຊາຍ ນາ ສວນ ຄຳ ແລະ ເງິນ ແລະ ໃນບໍລິສັດຜູ້ບໍ່ກຳໜັດຍິນດີໃນຕ່າງຫູແກ້ວມະນີ ລະຖິ້ມບຸດ ພັນລະຍາ ຂ້າທາດຍິງ ຂ້າທາດຊາຍ ນາ ສວນ ຄຳ ແລະ ເງິນ ແລ້ວອອກຈາກເຮືອນບວດເປັນບັນພະຊິດ"

ໂຄຕະມຸຂະພານກ່າວວ່າ "ທ່ານອຸເທນ ບຸກຄົນໃດບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະ ເປັນຜູ້ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ບຸກຄົນນັ້ນຊື່ວ່າບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນນັ້ນ ເປັນຜູ້ບໍ່ຫິວ ດັບຮ້ອນ ເຢັນໃຈ ມີຕົນອັນປະເສີດ ສະເຫວີຍສຸກຢູ່ໃນປັດຈຸບັນ

ຂ້າພະເຈົ້າເຫັນບຸກຄົນນີ້ມີຫຼາຍ ໃນບໍລິສັດຜູ້ບໍ່ກໍາໜັດຍິນດີໃນເມື່ອມີຕ່າງຫູແກ້ວມະນີ ລະຖິ້ມບຸດ ພັນລະຍາ ຂ້າທາດຍິງ ຂ້າທາດຊາຍ ນາ ສວນ ຄໍາ ແລະເງິນ ແລ້ວອອກຈາກເຮືອນບວດເປັນບັນພະຊິດ"

"ພານ ໃນບັດນີ້ນັ້ນເອງ ເຮົາຍ່ອມຮູ້ຄໍາທີ່ທ່ານກ່າວແລ້ວແນວນີ້ວ່າ "ສະມະນະ ຜູ້ຈະເລີນ ການບວດທີ່ຖືກຕ້ອງບໍ່ມີ ໃນການບວດນີ້ຂ້າພະເຈົ້າມີຄວາມເຫັນແນວນີ້ ຍ້ອນໃນການບວດນີ້ບັນດິດທັງຫລາຍເຊັ່ນທ່ານກໍຍັງບໍ່ເຫັນທໍາ"

"ທ່ານອຸເທນ ວາຈາທີ່ທ່ານກ່າວແກ່ຂ້າພະເຈົ້ານັ້ນ ເປັນວາຈາມີເຫດສະໜັບສະໜູນໂດຍແທ້ ການບວດທີ່ຖືກຕ້ອງມີຈິງ ໃນເລື້ອງນີ້ ຂ້າພະເຈົ້າມີຄວາມເຫັນແນວນີ້ ແລະຂໍທ່ານອຸເທນໂຜດຈືຂ້າພະເຈົ້າໄວ້ແນວນີ້ ອັນໜຶ່ງບຸກຄົນ ໔ ຈໍາພວກນີ້ ທ່ານອຸເທນກ່າວໂດຍຫຍໍ້ ບໍ່ຈໍາແນກໂດຍພິດສະດານ ຂໍໂອກາດເທີ້ນທ່ານ ຂໍທ່ານອຸເທນຊ່ອຍອະນຸເຄາະຈໍາແນກບຸກຄົນ ໔ ຈໍາພວກນີ້ ໃຫ້ຂ້າພະເຈົ້າຟັງໂດຍພິດສະດານດ້ວຍເທີ້ນ"

"ພານ ຖ້າເຊັ່ນນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ໂຄຕະມຸຂະພານຮັບຄໍາແລ້ວ ທ່ານພຣະອຸເທນໄດ້ກ່າວວ່າ

## ຕົດຖິຍະຂໍ້ວັດປະຕິບັດ

[໔໑໕] "ບຸກຄົນເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ເປັນອະເຈລະກະ (ປະພຶດເປືອຍກາຍ) ບໍ່ມີມາຣະຍາດເລຍມື ເຂົາເຊີນໃຫ້ໄປຮັບອາຫານກໍບໍ່ໄປ ເຂົາເຊີນໃຫ້ຢຸດຮັບອາຫານກໍບໍ່ຢຸດ ບໍ່ຮັບອາຫານທີ່ເຂົາ ແບ່ງໄວ້ ບໍ່ຮັບອາຫານທີ່ເຂົາເຮັດເຈາະຈົງ ບໍ່ຍິນດີອາຫານທີ່ເຂົາເຊີນ ບໍ່ຮັບອາຫານຈາກປາກໝໍ້ ບໍ່ຮັບອາຫານຈາກປາກພາຊະນະ ບໍ່ຮັບອາຫານກວມທໍຣະນີປະຕູ ບໍ່ຮັບອາຫານ ກວມໄມ້ຄ້ອນ ບໍ່ຮັບອາຫານກວມສາກ ບໍ່ຮັບອາຫານຂອງຄົນ ໒ ຄົນທີ່ກໍາລັງບໍຣິໂພກ ບໍ່ຮັບອາຫານຂອງຍິງມີທ້ອງ ບໍ່ຮັບອາຫານຂອງຍິງຜູ້ກໍາລັງໃຫ້ບຸດດື່ມນົມ ບໍ່ຮັບອາຫານຂອງຍິງທີ່ກ້ຽວພາຊາຍ ບໍ່ຮັບອາຫານທີ່ນັດແນະກັນເຮັດໄວ້ ບໍ່ຮັບອາຫານໃນບ່ອນລ້ຽງໝາ ບໍ່ຮັບອາຫານໃນບ່ອນ

ມີແມງວັນໄຕ່ຕອມເປັນກຸ່ມ ໆ ບໍ່ກິນປາ ບໍ່ກິນຊີ້ນ ບໍ່ດື່ມສຸຣາ ບໍ່ດື່ມເມໄຣ ບໍ່ດື່ມຢາດອງ ຮັບອາຫານໃນເຮືອນຫລັງດຽວ ເປັນຢູ່ດ້ວຍເຂົ້າ ຄຳດຽວ ຮັບອາຫານໃນເຮືອນ ໒ ຫລັງ ເປັນຢູ່ດ້ວຍເຂົ້າ ໒ ຄຳ ຯລຯ ຮັບອາຫານໃນເຮືອນ ໗ ຫລັງ ເປັນຢູ່ດ້ວຍເຂົ້າ ໗ ຄຳ ເປັນຢູ່ດ້ວຍອາຫານໃນຖາດນ້ອຍ ໑ ໃບ ເປັນຢູ່ດ້ວຍ ອາຫານໃນຖາດນ້ອຍ ໒ ໃບ ເປັນຢູ່ດ້ວຍອາຫານໃນຖາດນ້ອຍ ໓ ໃບ ຯລຯ ເປັນຢູ່ດ້ວຍອາຫານໃນຖາດນ້ອຍ ໗ ໃບ ກິນອາຫານທີ່ເກັບໄວ້ແຮມຄືນ ໑ ມື້ ກິນອາຫານທີ່ເກັບໄວ້ ແຮມຄືນ ໒ ມື້ ຯລຯ ກິນອາຫານທີ່ເກັບໄວ້ແຮມຄືນ ໗ ມື້ ຖືການບໍຣິໂພກອາຫານ ໑໕ ມື້ຕໍ່ ໑ ຄາບຢູ່ ດ້ວຍປະການແນວນີ້

ເຂົາເປັນຜູ້ກິນສົ້ມຜັກເປັນອາຫານ ກິນເຂົ້າຟ່າງເປັນອາຫານ ກິນໝາກເດືອຍເປັນອາຫານ ກິນກາກເຂົ້າເປັນອາຫານ ກິນສາຫຣ່າຍເປັນອາຫານ ກິນຮຳເປັນອາຫານ ກິນເຂົ້າກົ້ນໝໍ້ເປັນ ອາຫານ ກິນກຳຍານເປັນອາຫານ ກິນຫຍ້າເປັນອາຫານ ກິນມູນງົວເປັນອາຫານ ກິນເຫງົ້າ ແລະໝາກໄມ້ປ່າເປັນອາຫານ ບໍຣິໂພກໝາກໄມ້ຫລົ່ນເປັນຢູ່ ເຂົານຸ່ງຫົ່ມຜ້າປ່ານ ນຸ່ງຫົ່ມຜ້າແກມກັນ ນຸ່ງຫົ່ມຜ້າຫໍ່ສົບ ນຸ່ງຫົ່ມຜ້າບັງສຸກຸນ ນຸ່ງຫົ່ມຜ້າເປືອກໄມ້ ນຸ່ງຫົ່ມໜັງເສືອ ນຸ່ງຫົ່ມໜັງເສືອມີເລັບ ນຸ່ງຫົ່ມຜ້າຄາກອງ ນຸ່ງຫົ່ມຜ້າເປືອກປໍກອງ ນຸ່ງຫົ່ມຜ້າໝາກກອງ ນຸ່ງຫົ່ມ ຜ້າກຳພົນຜົມມະນຸດ ນຸ່ງຫົ່ມຜ້າກຳພົນຂົນສັດ ນຸ່ງຫົ່ມຜ້າຂົນປີກນົກເຄົ້າ ລົກຜົມແລະໜວດ ຄືຖືການລົກຜົມແລະໜວດຢືນແນວດຽວບໍ່ຍອມນັ່ງ ຍ່າງແຢ່ງແຢ້ ຄືຖືການຍ່າງແຢ່ງແຢ້ ນອນເທິງໜາມ ຄື ຖືການນອນເທິງໜາມ ອາບນ້ຳມື້ລະ ໓ ຄັ້ງ ຄືຖືການລົງອາບນ້ຳ ຖືການກ້າວແລະອົບກາຍຫຼາຍຮູບແບບຢູ່ ດ້ວຍປະການແນວນີ້

ພາມ ບຸກຄົນນີ້ຮຽກວ່າ ເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ

[໔໑໖] ບຸກຄົນເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ ເດືອດຮ້ອນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ຂ້າແບ້ ຂ້າໝູ ຂ້ານົກ ຂ້າເນື້ອ(ລ້ຽງຊີບ) ເປັນຄົນໂຫດຫ້ຽມ ເປັນຄົນຂ້າປາ ເປັນໂຈນ ເປັນຄົນຂ້າໂຈນ ເປັນຄົນຂ້າງົວ ເປັນຄົນຄຸມຄຸກ ຫຼື ລາງພວກເປັນຜູ້ທຳການທາລຸນ

ພາມ ບຸກຄົນນີ້ຮຽກວ່າ ເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ

[໔໑໗] ບຸກຄົນເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ເປັນພຣະຣາຊາມະຫາກະສັດຜູ້ໄດ້ຮັບມຸດທາພິເສກແລ້ວ ກໍດີ ເປັນພາມມະນະມະຫາສານກໍດີ ພຣະຣາຊານັ້ນໂຜດໃຫ້ສ້າງໂຮງບູຊາຍັນຫລັງໃໝ່ ທາງດ້ານທິດຕາເວັນອອກແຫ່ງພຣະນະຄອນ ປົງພຣະເກສາແລະພຣະມັດສຸ ຊົງນຸ່ງໜົ່ມໜັງເສືອມີເລັບ ຊົງທາພຣະວໍຣະກາຍດ້ວຍເນີຍໃສແລະນ້ຳມັນ ຊົງເກົາພຣະປຣິດສະດາງດ້ວຍເຂົາສັດ ເຂົ້າໄປສູ່ໂຮງບູຊາຍັນໃໝ່ພ້ອມດ້ວຍພຣະມະເຫສີແລະພາມປະໂລຫິດ ບັນທົມເທິງພື້ນຫຍ້າ ຊຽວຂະຈີ ບໍ່ໄດ້ລາດດ້ວຍເຄື່ອງປູລາດ ດຳລົງພະຊົນຢູ່ດ້ວຍນ້ຳນົມເຕົ້າທີ່ ໑ ແຫ່ງງົວ ແມ່ລູກອ່ອນທີ່ມີຢູ່ໂຕດຽວ ພຣະມະເຫສີດຳລົງພະຊົນຢູ່ດ້ວຍນ້ຳນົມເຕົ້າທີ່ ໔ ພາມປະໂລຫິດດຳລົງຊີວິດຢູ່ດ້ວຍນ້ຳນົມເຕົ້າທີ່ ໓ ບູຊາໄຟດ້ວຍນ້ຳນົມເຕົ້າທີ່ ໔ ງົວນ້ອຍມີຊີວິດຢູ່ດ້ວຍນ້ຳນົມທີ່ເຫຼືອ ພຣະຣາຊາຮັບສັ່ງແນວນີ້ວ່າ “ຈົ່ງຂ້າງົວເຖິກປະມານທໍ່ນີ້ບູຊາຍັນ ຈົ່ງຂ້າງົວນ້ອຍໂຕຜູ້ປະມານທໍ່ນີ້ບູຊາຍັນ ຈົ່ງຂ້າງົວນ້ອຍໂຕເມຍປະມານທໍ່ນີ້ບູຊາຍັນ ຈົ່ງຂ້າ ແບ້ປະມານທໍ່ນີ້ບູຊາຍັນ ຈົ່ງຂ້າແກະປະມານທໍ່ນີ້ບູຊາຍັນ ຈົ່ງຂ້າມ້າປະມານທໍ່ນີ້ບູຊາຍັນ ຈົ່ງຕັດຕົ້ນໄມ້ປະມານທໍ່ນີ້ເພື່ອເຮັດເສົາບູຊາຍັນ ຈົ່ງກ່ຽວຫຍ້າປະມານທໍ່ນີ້ ເພື່ອປູພື້ນ” ເຫຼົ່າຊົນຜູ້ເປັນຂ້າທາດກໍດີ ເປັນຄົນຮັບໃຊ້ກໍດີ ເປັນຄົນງານກໍດີຂອງພຣະຣາຊານັ້ນ ຖືກອາດຍາຄຸກຄາມ ຖືກໄພຄຸກຄາມ ມີນ້ຳຕານອງໜ້າ ຮ້ອງໄຫ້ໄປທຳງານໄປນຳ

ພາມ ບຸກຄົນນີ້ຮຽກວ່າ ເປັນຜູ້ເຮັດຕົນໃຫ້ເດືອດຮ້ອນ ໝັ່ນປະກອບໃນການ ເຮັດຕົນໃຫ້ເດືອດຮ້ອນ ແລະເປັນຜູ້ເຮັດຜູ້ອື່ນໃຫ້ເດືອດຮ້ອນ ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ ເດືອດຮ້ອນ

## ພຣະພຸດທະຄຸນ

[໔໑໗] ບຸກຄົນເປັນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຕົນ ໃຫ້ເດືອດຮ້ອນ ແລະເປັນຜູ້ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເຂົາບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ເປັນຜູ້ບໍ່ຫິວດັບຮ້ອນ ເຢັນໃຈ ມີຕົນອັນປະເສີດສະເຫວີຍສຸກຢູ່ໃນປັດຈຸບັນ ເປັນແນວໃດ?

ຄື ພຣະຕະຖາຄົດອຸບັດຂຶ້ນມາໃນໂລກນີ້ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງ ໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາ ແລະ ຈະຣະໃນສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫລາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ພຣະອົງຊົງຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະ ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ດ້ວຍພຣະອົງເອງແລ້ວ ຊົງປະກາດ ໃຫ້ຜູ້ອື່ນຮູ້ຕາມ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນທີ່ສຸດ ຊົງປະກາດພົມມະຈັນ ພ້ອມທັງອັດຖະແລະພະຍັນຊະນະບໍລິສຸດ ບໍລິບູນຄົບຖ້ວນ ຄະຫະບໍດີ ບຸດຄະຫະບໍດີ ຫຼື ອະນຸຊົນ (ຄົນຜູ້ເກີດ

ພາຍຫລັງ) ໃນຕະກູນໃດຕະກູນໜຶ່ງ ໄດ້ສະດັບທຳນັ້ນ ແລ້ວເກີດສັດທາໃນຕະຖາຄົດ ເມື່ອມີສັດທາຍ່ອມຕະຣະໜັກ ວ່າ "ການຢູ່ຄອງເຮືອນເປັນເລື້ອງອຶດອັດ ເປັນທາງມາແຫ່ງທຸລີ ການບວດເປັນທາງປອດໂປ່ງ ການທີ່ຜູ້ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນຄົບຖ້ວນຄືຫອຍສັງຂັດ ບໍ່ແມ່ນເຮັດໄດ້ງ່າຍ ທາງທີ່ດີ ເຮົາຄວນແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດອອກຈາກເຮືອນ ບວດເປັນບັນພະຊິດ" ຕໍ່ມາ ເຂົາລະຖິ້ມກອງໂພຄະສົມບັດນ້ອຍໃຫຍ່ ແລະເຄືອຍາດນ້ອຍໃຫຍ່ ແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກເຮືອນບວດເປັນບັນພະຊິດ

## ສິກຂາແລະສາຊີບຂອງພິກຂຸ

ເຂົາເມື່ອບວດແລ້ວແນວນີ້ ເປັນຜູ້ເຖິງພ້ອມດ້ວຍສິກຂາ ແລະ ສາຊີບຂອງພິກຂຸທັງຫລາຍ ຄື

໑. ລະ ເວັ້ນຂາດຈາກການຂ້າສັດ ວາງທັນດາວຸດແລະສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງຫວັງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່

໒. ລະ ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ຮັບເອົາແຕ່ຂອງ ທີ່ເຂົາໃຫ້ ມຸ້ງຫວັງແຕ່ຂອງທີ່ເຂົາໃຫ້ ບໍ່ເປັນຂີ້ລັກ ເປັນຄົນສະອາດຢູ່

໓. ລະພຶດຕິກຳອັນເປັນຂ້າເສິກຕໍ່ພົມມະຈັນ ປະພຶດພົມມະຈັນ໔ ເວັ້ນຫ່າງໄກຈາກເມຖຸນທຳ໕ ອັນເປັນກິດຂອງຊາວບ້ານ

໔. ລະ ເວັ້ນຂາດຈາກການເວົ້າຕົວະ ຄື ເວົ້າແຕ່ຄຳສັດ ດຳລົງຄວາມສັດ ມີຄຳເວົ້າເປັນຫລັກເຊື່ອຖືໄດ້ ບໍ່ຫລອກລວງຊາວໂລກ

໕. ລະ ເວັ້ນຂາດຈາກການເວົ້າສັບສໍ່ ຄື ຟັງຄວາມຈາກຝ່າຍນີ້ແລ້ວບໍ່ໄປບອກຝ່າຍນັ້ນເພື່ອທຳລາຍຝ່າຍນີ້ ຫຼືຟັງຄວາມຝ່າຍນັ້ນແລ້ວບໍ່ມາບອກຝ່າຍນີ້ເພື່ອທຳລາຍຝ່າຍນັ້ນ ສະມານຄົນທີ່ແຕກກັນ ສົ່ງເສີມຄົນທີ່ປອງດອງກັນຊົມຊື່ນຍິນດີ ເພີດເພີນຕໍ່ຜູ້ທີ່ສາມັກຄີກັນ ເວົ້າແຕ່ຄຳເວົ້າທີ່ສ້າງສັນຄວາມສາມັກຄີ

໖. ລະ ເວັ້ນຂາດຈາກການເວົ້າຄຳຫຍາບ ຄື ເວົ້າແຕ່ຄຳບໍ່ມີໂທດ ມ່ວນ ໜ້າຮັກ ຈັບໃຈ ເປັນຄຳຂອງຊາວເມືອງ ຄົນສ່ວນຫຼາຍຮັກແພງ ພໍໃຈ

໗. ລະ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ຄື ເວົ້າຖືກເວລາ ເວົ້າຄຳຈິງ ເວົ້າອີງປະໂຫຍດ ເວົ້າອີງທຳ ເວົ້າອີງວິໄນ ເວົ້າຄຳທີ່ມີຫລັກຖານ ມີທີ່ອ້າງອີງ ມີທີ່ກຳນົດ ປະກອບດ້ວຍປະໂຫຍດ ເໝາະແກ່ເວລາ

໘. ເວັ້ນຂາດຈາກການພາກພີຊະຄາມ໑ ແລະພູຕະຄາມ໔

໙. ສັນຄາບດຽວ ບໍ່ສັນຕອນກາງຄືນ ເວັ້ນຂາດຈາກການສັນໃນເວລາວິການ

໑໐. ເວັ້ນຂາດຈາກການຟ້ອນລຳ ຂັບຮ້ອງ ເສບດົນຕີ ແລະເບິ່ງການລະຫລິ້ນທີ່ເປັນຂ້າເສິກແກ່ກຸສົນ

໑໑. ເວັ້ນຂາດຈາກການທັດຊົງ ປະດັບ ຕົກແຕ່ງຮ່າງກາຍດ້ວຍພວງດອກໄມ້ ຂອງຫອມ ແລະເຄື່ອງຕົກແຕ່ງຜິວອັນເປັນລັກສະນະແຫ່ງການແຕ່ງໂຕ

໑໒. ເວັ້ນຂາດຈາກທີ່ນອນ ສູງໃຫຍ່

໑໓. ເວັ້ນຂາດຈາກການຄຳ ແລະເງິນ

໑໔. ເວັ້ນຂາດຈາກການຮັບ ທັນຍາຫານດິບ

໑໕. ເວັ້ນຂາດຈາກການຮັບ ຊີ້ນດິບ

໑໖. ເວັ້ນຂາດຈາກການຮັບ ສະຕີແລະກຸມາຣີ

໑໗. ເວັ້ນຂາດຈາກການຮັບ ຂ້າທາດຍິງແລະຂ້າທາດຊາຍ

໑໘. ເວັ້ນຂາດຈາກການຮັບ ແບ້ແລະແກະ

໑໙. ເວັ້ນຂາດຈາກການຮັບ ໄກ່ແລະໝູ

໒໐. ເວັ້ນຂາດຈາກການຮັບ ຊ້າງ ງົວ ມ້າ ແລະລາ

໒໑. ເວັ້ນຂາດຈາກການຮັບ ຮົ້ວສວນ ໄຮ່ ນາ ແລະທີ່ດິນ

໒໒. ເວັ້ນຂາດຈາກການເຮັດໜ້າທີ່ເປັນໂຕແທນແລະຜູ້ສື່ສານ

໒໓. ເວັ້ນຂາດຈາກການຊື້ຂາຍ

໒໔. ເວັ້ນຂາດຈາກການໂກງດ້ວຍຕາຊົງ ດ້ວຍຂອງປອມແລະດ້ວຍເຄື່ອງຕວງວັດ

໒໕. ເວັ້ນຂາດຈາກການຮັບສິນບົນ ການລໍ້ລວງ ແລະການຫລອກລວງ

໒໖. ເວັ້ນຂາດຈາກການຕັດ (ອະໄວຍະວະ) ການຂ້າ ການຄຸມຂັງ ການແລ່ນຕີຍາດຊິງ ການປຸ້ນ ແລະການຂົ່ມຂູ່ເອົາຊັບ

ພິກຂຸນັ້ນ ເປັນຜູ້ສັນໂດດດ້ວຍຈີວອນພໍຄຸ້ມຮ່າງກາຍ ແລະ ບິນທະບາດພໍອີ່ມທ້ອງ ຈະໄປໃນທີ່ໃດ ໆ ກໍໄປໄດ້ທັນທີ ເໝືອນນົກບິນໄປ ໃນທີ່ໃດ ໆ ກໍມີແຕ່ປີກເປັນພາລະ ແມ່ນສັນໃດ ພິກຂຸ ກໍສັນນັ້ນຄືກັນ ເປັນຜູ້ສັນໂດດດ້ວຍຈີວອນພໍຄຸ້ມຮ່າງກາຍ ແລະ ບິນທະບາດພໍອີ່ມທ້ອງ ຈະໄປໃນທີ່ໃດ ໆ ກໍໄປໄດ້ທັນທີ ພິກຂຸນັ້ນ ປະກອບດ້ວຍອະຣິຍະສີລຂັນ ຍ່ອມສະເຫວີຍສຸກອັນປາສະຈາກໂທດໃນພາຍໃນ

## ການສັງລວມອິນຊີ

[໔໑໙] ພິກຂຸນັ້ນ ເຫັນຮູບທາງຕາແລ້ວ ບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາ ແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ

ຟັງສຽງທາງຫູ ຯລຯ

ດົມກິ່ນທາງດັງ ຯລຯ

ຊີມຣົດທາງລີ້ນ ຯລຯ

ຖືກຕ້ອງໂຜດຖັບພະທາງກາຍ ຯລຯ

ຮູ້ທຳມາຣົມທາງໃຈແລ້ວ ບໍ່ໂຮມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາ ແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ພິກຂຸຜູ້ປະກອບດ້ວຍຄວາມສັງລວມອິນຊີອັນເປັນອະຣິຍະນີ້ ຍ່ອມສະເຫວີຍສຸກອັນບໍ່ຜະສົມກັບກິເລດໃນພາຍໃນ

ພິກຂຸນັ້ນທຳຄວາມຮູ້ສຶກໂຕໃນການກ້າວໄປ ການຖອຍກັບ ການແລເບິ່ງ ການຫລຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດແລະຈີວອນ ການສັນ ການດື່ມ ການຫຍໍ້າ ການຊີມ ການຖ່າຍອຸດຈາຣະປັດສາວະ ການຍ່າງ ການຢືນ ການນັ່ງ ການນອນ ການຕື່ນ ການເວົ້າ ການນິ່ງ

## ການລະນີວອນ

ພິກຂຸນັ້ນ ປະກອບດ້ວຍອະຣິຍະສີລຂັນ ອະຣິຍະອິນຊີສັງວອນ ແລະ ອະຣິຍະສະຕິສຳປະຊັນຍະນີ້ແລ້ວ ພັກຢູ່ທີ່ເສນາສະນະງຽບສະຫງັດ ຄື ປ່າ ເຫງົ້າໄມ້ ພູ ຊອກເຂົາ ຖໍ້າ ປ່າຊ້າ ປ່າຊັດ ກາງແຈ້ງ ລອມຟາງ ທ່ານກັບຈາກບິນທະບາດ ພາຍຫລັງສັນພັດຕາຫານສຳເລັດແລ້ວ ນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິສະເພາະໜ້າ ທ່ານລະອະພິດຊາ (ຄວາມເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ) ໃນໂລກ ມີໃຈປາສະຈາກອະພິດຊາຢູ່ ຊຳຣະຈິດໃຫ້ບໍລິສຸດຈາກອະພິດຊາ ລະຄວາມມຸ້ງຮ້າຍຄືພະຍາບາດ (ຄວາມປອງຮ້າຍເຂົາ) ມີຈິດບໍ່ພະຍາບາດ ມຸ້ງປະໂຫຍດເກື້ອກູນສັບພະສັດຢູ່ ຊຳຣະຈິດໃຫ້ບໍລິສຸດຈາກຄວາມມຸ້ງຮ້າຍຄືພະຍາບາດ ລະຖີນະມິດທະ (ຄວາມທໍດທູ່ແລະງ່ວມເຫງົາ) ປາສະຈາກຖີນະມິດທະ ກຳນົດແສງສະຫວ່າງ ມີສະຕິສຳປະຊັນຍະຢູ່ ຊຳຣະ ຈິດໃຫ້ບໍລິສຸດຈາກຖີນະມິດທະ ລະອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະຄວາມລຳຄານໃຈ) ເປັນຜູ້ບໍ່ຟຸ້ງຊ່ານ ມີຈິດສະງົບຢູ່ພາຍໃນ ຊຳຣະຈິດໃຫ້ບໍລິສຸດຈາກອຸດທັດຈະກຸກກຸດຈະ ລະວິຈິກິດສາ (ຄວາມລັງເລສົງໄສ) ຂ້າມວິຈິກິດສາໄດ້ແລ້ວ ບໍ່ມີວິຈິກິດສາໃນກຸສົນທຳຢູ່ ຊຳຣະຈິດໃຫ້ບໍລິສຸດຈາກວິຈິກິດສາ

## ຊານ ໔

ພິກຂຸນັ້ນລະນິວອນ ໕ ປະການນີ້ ທີ່ເປັນເຄື່ອງເສົ້າໝອງແຫ່ງຈິດ ເປັນເຄື່ອງທອນກຳລັງປັນຍາແລ້ວ ສະຫງັດຈາກກາມ ແລະ ອະກຸສົນທຳທັງຫລາຍແລ້ວ ບັນລຸປະຖົມຊານ ທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່

ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານ ມີຄວາມຜ່ອງໃສໃນພາຍໃນມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປີຕິ ແລະ ສຸກອັນເກີດຈາກສະມາທິຢູ່

ຍ້ອນປີຕິຈາງຄາຍອອກ ມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫລາຍສັນເສີນວ່າ "ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ"

ຍ້ອນລະສຸກ ແລະ ທຸກໄດ້ ຍ້ອນໂສມະນັດ ແລະ ໂທມະນັດດັບໄປກ່ອນ ບັນລຸຈະຕຸດຖະຊານ ທີ່ບໍ່ມີທຸກ ແລະ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່

## ວິດຊາ ໓

[໔໘໐] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນ ນ້ອມຈິດໄປເພື່ອປຸບເພນິວາສານຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບເປັນຈຳນວນຫລາຍແດ່ ຕະຫຼອດວິວັດຕະກັບເປັນຈຳນວນຫລາຍແດ່ ຕະຫຼອດສັງວັດຕະກັບແລະວິວັດຕະກັບ໘ ເປັນຈຳນວນຫລາຍແດ່ວ່າ "ໃນພົບນັ້ນ ເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນ ກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ ເຮົາກໍມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນຈຶ່ງມາເກີດໃນພົບນີ້" ທ່ານຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະ ຊີວະປະຫວັດແນວນີ້

ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດ ໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະ ມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ

ມີຄວາມເຫັນຜິດ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ພວກເຂົາຫລັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸຄະຕິ ວິນິບາດ ນະຮົກ ແຕ່ໝູ່ສັດທີ່ປະກອບກາຍສຸດຈະຣິດ ວະຈີສຸຈະຣິດ ແລະມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກ ຊັກຊວນຜູ້ອື່ນ ໃຫ້ເຮັດກຳຕາມຄວາມເຫັນຖືກ ພວກເຂົາຫລັງຈາກຕາຍ ແລ້ວ ຈະໄປເກີດໃນສຸຄະຕິໂລກສະຫວັນ ທ່ານເຫັນໝູ່ສັດກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງໝູ່ສັດຜູ້ເປັນໄປຕາມກຳ ແນວນີ້ແລ

ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມ ເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແນວນີ້ ພິກຂຸນັ້ນນ້ອມຈິດ ໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣດ ນີ້ທຸກຂະນິໂຣດຄາມີນີປະຕິປະທາ ນີ້ອາສະວະ ນີ້ອາສະວະສະມຸໄທ ນີ້ອາສະວະນິໂຣດ ນີ້ອາສະວະນິໂຣດຄາມີນີປະຕິປະທາ" ເມື່ອທ່ານຮູ້ເຫັນຢູ່ແນວນີ້ ຈິດຍ່ອມລຸດພົ້ນຈາກກາມາສະຫວະ ພະວາດະວະ ແລະ ອະວິດຊາສະຫວະ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ພາມ ບຸກຄົນນີ້ຮຽກວ່າ ເປັນຜູ້ບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບ ໃນການເຮັດຕົນໃຫ້ເດືອດຮ້ອນ ແລະ ເປັນຜູ້ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ບໍ່ໝັ່ນປະກອບໃນການເຮັດຜູ້ອື່ນໃຫ້ເດືອດຮ້ອນ ເຂົາບໍ່ເຮັດຕົນໃຫ້ເດືອດຮ້ອນ ບໍ່ເຮັດຜູ້ອື່ນໃຫ້ເດືອດຮ້ອນ ຈຶ່ງເປັນຜູ້ບໍ່ຫິວ ດັບຮ້ອນເຢັນໃຈ ມີຕົນອັນປະເສີດສະເຫວີຍສຸກຢູ່ໃນປັດຈຸບັນ"

## ການສ້າງສາລາສົງ

[໔໘໑] ເມື່ອທ່ານພຣະອຸເທນກ່າວແນວນີ້ແລ້ວ ໂຄຕະມຸຂະພາມໄດ້ກ່າວກັບທ່ານພຣະອຸເທນວ່າ

"ທ່ານອຸເທນ ພາສິດຂອງທ່ານຊັດເຈນມ່ວນຫຼາຍ ທ່ານອຸເທນ ພາສິດຂອງທ່ານຊັດເຈນມ່ວນຫຼາຍ ທ່ານອຸເທນປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫລົງທາງ ຫຼືເຍືອງໄຟ ໃນບ່ອນມືດ ດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພະເຈົ້ານີ້ຂໍເຖິງທ່ານອຸເທນພ້ອມທັງ ພຣະທຳແລະພຣະສົງເປັນສະຣະນະ ຂໍທ່ານອຸເທນໂຜດຈົ່ງຈືຂ້າພະເຈົ້າວ່າເປັນອຸປາສົກຜູ້ເຖິງ ສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

ທ່ານພຣະອຸເທນ ກ່າວວ່າ "ພາມ ທ່ານຢ່າເຖິງອາດຕະມາພາບເປັນສະຣະນະເລີຍ ເຊີນທ່ານເຖິງພຣະຜູ້ມີພຣະພາກເຈົ້າທີ່ອາດຕະມາພາບເຖິງເປັນສະຣະນະເທີ້ນ"

"ຂ້າແດ່ ທ່ານອຸເທນ ບັດນີ້ ພຣະໂຄດົມອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນປະທັບຢູ່ທີ່ໃດ"

"ພາມ ບັດນີ້ ພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າ ປະຣິນິບພານສາແລ້ວ"

"ທ່ານອຸເທນ ຖ້າຂ້າພະເຈົ້າໄດ້ຟັງວ່າ "ທ່ານພຣະໂຄດົມພຣະອົງນັ້ນປະທັບຢູ່ທີ່ໃດ ໃນຫົນທາງແມ່ນ ໑໐ ໂຍດ" ຂ້າພະເຈົ້າກໍຈັກໄປເຝົ້າທ່ານພຣະໂຄດົມອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ແມ່ນສິ້ນທາງ ໑໐ ໂຍດ ຖ້າຂ້າພະເຈົ້າໄດ້ຟັງວ່າ "ທ່ານພຣະໂຄດົມພຣະອົງນັ້ນປະທັບຢູ່ທີ່ໃດ ໃນຫົນທາງແມ່ນ ໔໐ ໂຍດ ຯລຯ໕໐ ໂຍດ ຯລຯ ໔໐ ໂຍດ ຯລຯ ໕໐ ໂຍດ ຯລຯ ໑໐໐ ໂຍດ" ຂ້າພະເຈົ້າ ກໍຈະໄປເຝົ້າທ່ານພຣະໂຄດົມ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນແມ່ນສິ້ນທາງ ໑໐໐ ໂຍດ

ແຕ່ຍ້ອນທ່ານພຣະໂຄດົມພຣະອົງນັ້ນ ສະເດັດປະຣິນິບພານສາແລ້ວ ຂ້າພະເຈົ້າຂໍເຖິງທ່ານພຣະໂຄດົມພຣະອົງນັ້ນ ແມ່ນສະເດັດປະຣິນິບພານແລ້ວ ພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍທ່ານອຸເທນ ໂຜດຈົ່ງຈືຂ້າພະເຈົ້າວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ ອັນໜຶ່ງ ພຣະເຈົ້າອັງຄະໂຜດພຣະຣາດຊະທານເບ້ຍລ້ຽງປະຈຳແກ່ຂ້າພະເຈົ້າ ທຸກມື້ ຂ້າພະເຈົ້າຂໍຖວາຍສ່ວນໜຶ່ງຈາກເບ້ຍລ້ຽງປະຈຳນັ້ນແກ່ທ່ານອຸເທນ"

"ພາມ ພຣະເຈົ້າອັງຄະໂຜດພຣະຣາດຊະທານອັນໃດ ເປັນເບ້ຍລ້ຽງປະຈຳແກ່ທ່ານທຸກມື້"

"ທ່ານອຸເທນ ພຣະເຈົ້າອັງຄະໂຜດພຣະຣາດຊະທານຊັບ ໕໐໐ ກະຫາປະໜະເປັນເບ້ຍລ້ຽງປະຈຳແກ່ຂ້າພະເຈົ້າທຸກມື້"

"ພາມ ການຮັບຄຳແລະເງິນບໍ່ສົມຄວນແກ່ອາດຕະມາພາບທັງຫລາຍ"

"ທ່ານອຸເທນ ຖ້າຄຳແລະເງິນນັ້ນບໍ່ສົມຄວນ ຂ້າພະເຈົ້າຈະໃຫ້ສ້າງວິຫານຖວາຍທ່ານ ອຸເທນ"

ທ່ານພຣະອຸເທນ ກ່າວວ່າ "ພາມ ຖ້າທ່ານປາຖະໜາຈະໃຫ້ສ້າງວິຫານຖວາຍ ອາດຕະມາພາບກໍຂໍໃຫ້ສ້າງໂຮງສັນຖວາຍແກ່ສົງໃນເມືອງປາຕະລີບຸດເທີ້ນ"

ໂຄຕະມຸຂະພາມ ກ່າວວ່າ "ດ້ວຍບຸນທີ່ທ່ານອຸເທນຊັກຊວນຂ້າພະເຈົ້າໃນສັງຄະທານນີ້ຂ້າພະເຈົ້າຊົມຊື່ນຍິນດີເຫຼືອປະມານ ທ່ານອຸເທນ ຂ້າພະເຈົ້າຈະສ້າງໂຮງສັນຖວາຍແກ່ສົງໃນເມືອງປາຕະລີບຸດ ດ້ວຍເບ້ຍລ້ຽງປະຈຳສ່ວນນີ້ ແລະເບ້ຍລ້ຽງປະຈຳສ່ວນອື່ນ"

ຄັ້ງນັ້ນແລ ໂຄຕະມຸຂະພາມໃຫ້ຈັດສ້າງໂຮງສັນຖວາຍແກ່ສົງໃນເມືອງປາຕະລີບຸດ ດ້ວຍເບ້ຍລ້ຽງປະຈຳສ່ວນນີ້ ແລະເບ້ຍລ້ຽງປະຈຳສ່ວນອື່ນ ໆ ໂຮງສັນນັ້ນປັດຈຸບັນຮຽກວ່າ “ໂຄດມຸຂີ” ດັ່ງນີ້ແລ

**ໂຄຕະມຸຂະສູດທີ່ ໔ ຈົບ**

# ໕. ຈັງກີສູດ

## ວ່າດ້ວຍພາມຊື່ຈັງກີ

[໔໘໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມກັບພິກຂຸສົງໝູ່ໃຫຍ່ ສະເດັດເຖິງເຮືອນພາມຊື່ ໂອປາສາທະ ຂອງຊາວໂກສົນ ປະທັບຢູ່ທີ່ປ່າໄມ້ສາລະຊື່ເທພະວັນ ທາງທິດເໜືອແຫ່ງເຮືອນພາມຊື່ ໂອປາສາທະ ສະໄໝນັ້ນແລ ພາມ ຊື່ຈັງກີປົກຄອງເຮືອນພາມຊື່ ໂອປາສາທະ ເຊິ່ງມີປະຊາກອນແລະສັດລ້ຽງຫລວງຫລາຍ ມີພືດພັນທັນຍາຫານແລະນ້ຳຫຍ້າອຸດົມສົມບູນ ເປັນພຣະຣາຊະຊັບທີ່ພຣະເຈົ້າປະເສນທິໂກສົນ ພຣະຣາດຊະທານປູນບຳເໜັດໃຫ້ເປັນພົມໄທ ພາມແລະຄະຫະບໍດີຊາວບ້ານໂອປາສາທະໄດ້ຟັງຂ່າວວ່າ

“ໄດ້ຂ່າວວ່າ ທ່ານພຣະສະມະນະໂຄດົມເປັນສາກະຍະບຸດ ສະເດັດອອກບວດຈາກສາກະຍະຕະກູນ ສະເດັດຈາຣິກຢູ່ໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸໝູ່ໃຫຍ່ ສະເດັດເຖິງເຮືອນພາມຊື່ ໂອປາສາທະໂດຍລຳດັບ ປະທັບຢູ່ທີ່ປ່າໄມ້ສາລະຊື່ ເທພະວັນ ທາງທິດເໜືອແຫ່ງເຮືອນພາມຊື່ ໂອປາສາທະ ທ່ານພຣະສະມະນະໂຄດົມພຣະອົງນັ້ນມີກິດຕິສັບອັນງາມຊ່າລືໄປແນວນີ້ວ່າ “ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຮູ້ ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະໃນສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫລາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ” ພຣະອົງຊົງຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດດ້ວຍ ພຣະອົງເອງແລ້ວ ຊົງປະກາດໃຫ້ຜູ້ອື່ນຮູ້ຕາມ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນທີ່ສຸດ ຊົງປະກາດພົມມະຈັນພ້ອມທັງ ອັດຖະແລະພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນ ການໄດ້ພົບພຣະອະຣະຫັນທັງຫລາຍແນວນີ້ເປັນຄວາມດີ ຢ່າງແທ້ຈິງ”

[໔໘໙] ຄັ້ງນັ້ນແລ ພາມແລະຄະຫະບໍດີຊາວບ້ານພາມຊື່ ໂອປາສາທະ ອອກຈາກເຮືອນພາມຊື່ໂອປາສາທະລວມກັນເປັນໝູ່ ໄປສູ່ປ່າໄມ້ສາລະຊື່ເທພະວັນທາງທິດເໜືອ ສະໄໝນັ້ນ ຈັງ

ກີພາມພັກຜ່ອນກາງເວັນຢູ່ທີ່ຜາສາດຊັ້ນເທິງ ແນມເຫັນພາມ ແລະ ຄະຫະບໍດີຊາວບ້ານພາມຊື່ໂອປາສາທະເຊິ່ງລ້ວນອອກຈາກເຮືອນພາມຊື່ໂອປາສາທະຍ່າງລວມກັນເປັນໝູ່ ໄປທາງທິດເໜືອເຂົ້າໄປສູ່ປ່າໄມ້ສາລະຊື່ເທພະວັນ ຈຶ່ງຮຽກອໍາມາດທີ່ປຶກສາມາຖາມວ່າ

"ອໍາມາດ ພາມແລະຄະຫະບໍດີຊາວບ້ານພາມຊື່ ໂອປາສາທະອອກຈາກເຮືອນພາມຊື່ໂອປາສາທະຍ່າງລວມກັນເປັນໝູ່ ໄປທາງທິດເໜືອ ເຂົ້າໄປສູ່ປ່າໄມ້ສາລະ ຊື່ເທພະວັນ ເຮັດຫຍັງກັນນໍ?"

ອໍາມາດທີ່ປຶກສາຕອບວ່າ "ຂ້າແດ່ ທ່ານຈັງກີ ພຣະສະມະນະໂຄດົມເປັນສາກະຍະບຸດສະເດັດອອກບວດຈາກສາກະຍະຕະກູນ ສະເດັດຈາຣິກຢູ່ໃນແຄວັນໂກສົນພ້ອມດ້ວຍພິກຂຸໝູ່ໃຫຍ່ ສະເດັດເຖິງ ເຮືອນພາມຊື່ໂອປາສາທະໂດຍລໍາດັບ ປະທັບຢູ່ທີ່ປ່າໄມ້ສາລະຊື່ເທພະວັນທາງທິດເໜືອ ແຫ່ງເຮືອນພາມຊື່ໂອປາສາທະ ທ່ານພຣະໂຄດົມພຣະອົງນັ້ນມີກິດຕິສັບອັນງາມຂ່າລືໄປແນວນີ້ວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະໃນສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫລາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ພາມແລະຄະຫະບໍດີເຫຼົ່ານັ້ນ ພາກັນໄປເຂົ້າເຝົ້າທ່ານພຣະໂຄດົມນັ້ນ"

ຈັງກີພາມກ່າວວ່າ "ພໍ່ອໍາມາດ ຖ້າເຊັ່ນນັ້ນ ທ່ານຈົ່ງໄປຫາພວກພາມແລະຄະຫະບໍດີຊາວບ້ານພາມຊື່ໂອປາສາທະແລ້ວບອກແນວນີ້ວ່າ "ທ່ານຂ້ານ້ອຍ ຈັງກີພາມເວົ້າວ່າ "ຂໍທ່ານຜູ້ຈະເລີນທັງຫລາຍຈົ່ງຖ້າກ່ອນ ແມ່ນຈັງກີພາມກໍຈະໄປເຂົ້າເຝົ້າພຣະສະມະນະໂຄດົມດ້ວຍ"

ອໍາມາດທີ່ປຶກສາຮັບຄໍາຂອງຈັງກີພາມແລ້ວ ເຂົ້າໄປຫາພວກພາມ ແລະ ຄະຫະບໍດີຊາວບ້ານພາມຊື່ໂອປາສາທະແລ້ວກໍບອກວ່າ "ທ່ານຂ້ານ້ອຍ ຈັງກີພາມ ເວົ້າວ່າ "ຂໍທ່ານຜູ້ຈະເລີນທັງຫລາຍຈົ່ງຖ້າກ່ອນ ແມ່ນຈັງກີພາມກໍຈະໄປເຂົ້າເຝົ້າພຣະສະມະນະໂຄດົມດ້ວຍ"

## ຄວາມເປັນຜູ້ດີຂອງຈັງກີພາມ

[໘໘໔] ເວລານັ້ນ ພາມຕ່າງຖິ່ນ ໕໐໐ ຄົນ ມີທຸລະເດີນທາງມາພັກຢູ່ ໃນເຮືອນພາມຊື່ໂອປາສາທະພໍໄດ້ຟັງວ່າ "ຈັງກີພາມຈັກໄປເຂົ້າເຝົ້າພຣະສະມະນະໂຄດົມດ້ວຍ" ຈຶ່ງພາກັນເຂົ້າໄປຫາຈັງກີພາມຮອດບ່ອນຢູ່ແລ້ວຖາມວ່າ "ທ່ານຈັງກີຈັກໄປ ເຂົ້າເຝົ້າພຣະສະມະນະໂຄດົມຈິງບໍ?"

ຈັງກີພາມຕອບວ່າ "ຈິງ ເຮົາຄິດຈະໄປເຂົ້າເຝົ້າພຣະສະມະນະໂຄດົມ"

ພວກພາມຫ້າມວ່າ "ທ່ານຈັງກີຢ່າໄດ້ໄປເຂົ້າເຝົ້າພຣະສະມະນະໂຄດົມເລີຍ ທ່ານຈັງກີບໍ່

ຄວນໄປເຂົ້າເຝົ້າພຣະສະມະນະໂຄດົມ ພຣະສະມະນະໂຄດົມຕ່າງຫາກຄວນຈະສະເດັດມາຫາທ່ານຈັງກີ ຍ້ອນວ່າ ທ່ານຈັງກີເປັນຜູ້ມີຊາດກຳເນີດດີທັງຝ່າຍມານດາແລະຝ່າຍບິດາ ຖືປະຕິສົນທິບໍລິສຸດດີຕະຫຼອດ ໗ ຊົ່ວບັນພະບຸຣຸດ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ຍ້ອນອ້າງເຖິງຊາດຕະກູນ ດ້ວຍເຫດນີ້ ທ່ານຈັງກີຈຶ່ງບໍ່ຄວນໄປເຂົ້າເຝົ້າພຣະສະມະນະໂຄດົມ ພຣະສະມະນະໂຄດົມຕ່າງຫາກຄວນ ສະເດັດມາຫາທ່ານຈັງກີ

ອັນໜຶ່ງ ທ່ານຈັງກີເປັນຄົນຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ຯລຯ ຈົບໄຕຣເພດ ພ້ອມທັງນິກຄັນທຸສາດ ເກຕຸພະສາດ ອັກສອນສາດ ແລະປະຫວັດສາດ ເຂົ້າໃຈ ໂຕບົດແລະໄວຍາກອນ ຊ່ຽວຊານໂລກາຍະຕະສາດແລະລັກສະນະມະຫາບຸຣຸດ ຯລຯ ເປັນຜູ້ມີ ຮູບງາມ ໜ້າເບິ່ງໜ້າເຫຼື້ອມໃສ ມີຜິວພັນຜຸດຜ່ອງຍິ່ງ ຄືພົມ ມີກາຍຄືພົມ ໂອກາດທີ່ຈະໄດ້ພົບເຫັນຍາກນັກ ຯລຯ ເປັນຜູ້ມີສິນ ມີສິນທີ່ຈະເລີນ ປະກອບດ້ວຍສິນທີ່ຈະເລີນ ຯລຯ ເປັນຜູ້ມີວາຈາມ່ອນສຸພາບປະກອບດ້ວຍຄຳເວົ້າອ່ອນຫວານແນວຊາວເມືອງ ນຸ້ມນວລ ເຂົ້າໃຈງ່າຍ ຯລຯ ເປັນອາຈານແລະປາຈານຍ໌ຂອງໝູ່ຊົນ ສອນມົນແກ່ມານົບ ໓໐໐ ຄົນ ຯລຯ ທ່ານຈັງກີເປັນຜູ້ທີ່ພຣະເຈົ້າປະເສນທິໂກສົນສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມ ຯລຯ ເປັນຜູ້ທີ່ພາມຊື່ໂປກຂະຣະສາຕິສັກກາຣະ ເຄົາລົບ ນັບຖື ນອບນ້ອມ ຯລຯ

ທ່ານຈັງກີປົກຄອງເຮືອນພາມຊື່ ໂອປາສາທະ ເຊິ່ງມີປະຊາກອນແລະສັດລ້ຽງຫລວງຫລາຍ ມີພືດພັນທັນຍາຫານແລະນ້ຳຫຍ້າອຸດົມສົມບູນ ເປັນພຣະຣາຊະຊັບທີ່ພຣະເຈົ້າປະເສນທິໂກສົນພຣະຣາດຊະທານປູນບຳເໜັດໃຫ້ເປັນພົມໄທ ດ້ວຍເຫດນີ້ ທ່ານຈັງກີຈຶ່ງບໍ່ຄວນໄປ ເຂົ້າເຝົ້າພຣະສະມະນະໂຄດົມ ພຣະສະມະນະໂຄດົມຕ່າງຫາກຄວນຈະສະເດັດມາຫາທ່ານຈັງກີ"

## ສັນເສີນຄຸນຂອງພຣະພຸດທະເຈົ້າ

[໔໘໕] ເມື່ອພວກພາມກ່າວແນວນີ້ແລ້ວ ຈັງກີພາມໄດ້ກ່າວວ່າ

"ທ່ານທັງຫລາຍ ຖ້າເຊັ່ນນັ້ນ ພວກທ່ານຈົ່ງຟັງເຮົາແດ່ ເຮົານີ້ແລ້ວຄວນໄປເຂົ້າເຝົ້າທ່ານພຣະໂຄດົມ ທ່ານພຣະໂຄດົມບໍ່ຄວນສະເດັດມາຫາເຮົາ ໄດ້ຮູ້ວ່າ ທ່ານພຣະສະມະນະໂຄດົມຊຶ່ງເປັນຜູ້ມີພຣະຊາດກຳເນີດດີທັງຝ່າຍພຣະຊົນນີ ແລະຝ່າຍພຣະຊະນົກ ຊຶ່ງຖືປະຕິສົນທິບໍລິສຸດ ດີຕະຫຼອດ ໗ ຊົ່ວບັນພະບຸຣຸດ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ຍ້ອນອ້າງເຖິງຊາດຕະກູນ ດ້ວຍເຫດນີ້ທ່ານພຣະໂຄດົມຈຶ່ງບໍ່ຄວນສະເດັດມາຫາເຮົາ ເຮົາຕ່າງຫາກຄວນໄປເຂົ້າເຝົ້າທ່ານພຣະໂຄດົມ

ທ່ານທັງຫລາຍ ໄດ້ຮູ້ວ່າ ພຣະສະມະນະໂຄດົມຊົງສະລະເງິນຄຳຫລວງຫລາຍທັງທີ່ຝັງຢູ່ໃນພື້ນດິນ ແລະ ໃນອາກາດ ບວດແລ້ວ ຯລຯ ພຣະສະມະນະໂຄດົມກຳລັງໜຸ່ມແໜ້ນ ມີພຣະເກສາດຳປອດ ຊົງພຣະຈະເລີນຢູ່ໃນປະຖົມວັຍ ສະເດັດອອກຈາກພະຣາດຊະວັງ ບວດ

ເປັນບັນພະຊິດ ໆລໆ ເມື່ອພຣະຊົນນີແລະພຣະຊະນົກບໍ່ຊົງປາຖະໜາ (ຈະໃຫ້ສະເດັດອອກບວດ) ມີນ້ຳພຣະເນດຊຸ່ມພຣະພັກຊົງກັນແສງຢູ່ ພຣະສະມະນະໂຄດົມຊົງປົງພຣະເກສາແລະພຣະມັດສຸ ແລ້ວຄອງຜ້າກາສາວະພັດ ສະເດັດອອກຈາກພະຣາດຊະວັງບວດເປັນບັນພະຊິດ ໆລໆ ພຣະສະມະນະໂຄດົມມີພຣະຮູບງົດງາມ ໜ້າເບິ່ງ ໜ້າເຫຼື້ອມໃສ ມີພຣະສະຫວີວັນນະຜຸດຜ່ອງຍິ່ງ ຄື ພົມ ມີພຣະວໍຣະກາຍຄືພົມ ໂອກາດທີ່ຈະໄດ້ພົບເຫັນຍາກນັກ ໆລໆ ພຣະສະມະນະໂຄດົມ ຊົງມີອະຣິຍະສີນ໑ ມີສີນທີ່ເປັນກຸສົນ ປະກອບດ້ວຍສີນທີ່ເປັນກຸສົນ ໆລໆ ມີພຣະວາຈາມ່ອນສຸພາບ ປະກອບດ້ວຍຄຳເວົ້າອ່ອນຫວານແນວຊາວເມືອງນຸ້ມນວນ ເຂົ້າໃຈງ່າຍ ໆລໆ ຊົງເປັນອາຈານແລະປາຈານຍ໌ຂອງໝູ່ຊົນຫລວງຫລາຍ ໆລໆ ຊົງສິ້ນກາມລາຄະ ບໍ່ປະດັບຕົກແຕ່ງ ໆລໆ ຊົງເປັນກຳມະວາທີ ເປັນກິຣິຍະວາທີ ບໍ່ຊົງມຸ້ງຮ້າຍຕໍ່ພານ ໆລໆ ບວດແລ້ວຈາກຕະກູນສູງ ຄື ຂັດຕິຍຕະກູນອັນບໍລິສຸດ ໆລໆ ບວດແລ້ວຈາກຕະກູນ ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ໆລໆ ປະຊາຊົນຕ່າງເຮືອນຕ່າງເມືອງພາກັນມາທູນຖາມບັນຫາພຣະສະມະນະໂຄດົມ ໆລໆ ທວຍເທບຫຼາຍພັນອົງຖວາຍຊີວິດຂໍເຖິງພຣະສະມະນະໂຄດົມເປັນທີ່ເພິ່ງ ໆລໆ ພຣະສະມະນະໂຄດົມຊົງມີກິດຕິສັບອັນງາມຂ່າລືໄປແນວນີ້ວ່າ “ແມ່ນຍ້ອນ ເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ໆລໆ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ” ໆລໆ ພຣະສະມະນະໂຄດົມຊົງປະກອບດ້ວຍລັກສະນະມະຫາບຸຣຸດ ໓໘ ປະການ ໆລໆ ພຣະເຈົ້າພິມພິສານ ຈອມທັບມະຄົດ ພ້ອມທັງພຣະຣາຊະໂອຣົດແລະພຣະມະເຫສີ ຊົງຖວາຍຊີວິດເຖິງພຣະສະມະນະໂຄດົມເປັນສະຣະນະ ໆລໆ ພຣະເຈົ້າປະເສນທິໂກສົນພ້ອມທັງພຣະຣາຊະໂອຣົດແລະພຣະມະເຫສີ ຊົງຖວາຍຊີວິດເຖິງພຣະສະມະນະໂຄດົມເປັນສະຣະນະ ໆລໆ ໂປກຂະຣະສາຕິພານ ພ້ອມທັງບຸດພັນລະຍາ ກໍໄດ້ຖວາຍຊີວິດເຖິງພຣະສະມະນະໂຄດົມເປັນສະຣະນະ ໆລໆ

ພຣະສະມະນະໂຄດົມສະເດັດເຖິງເຮືອນພານຊື່ໂອປາສາທະໂດຍລຳດັບ ປະທັບຢູ່ທີ່ປ່າໄມ້ສາລະຊື່ເທພະວັນ ທາງທິດເໜືອແຫ່ງເຮືອນພານຊື່ໂອປາສາທະ ສະມະນະພານທີ່ມາສູ່ເຂດໝູ່ບ້ານຂອງເຮົາຈັດວ່າເປັນແຂກຂອງເຮົາ ເຊິ່ງພວກເຮົາຄວນສັກກາຣະ ເຄົາລົບ ນັບຖື ບູຊາ ພຣະສະມະນະໂຄດົມສະເດັດມາເຖິງເຮືອນພານຊື່ໂອປາສາທະໂດຍລຳດັບ ປະທັບຢູ່ທີ່ປ່າໄມ້ສາລະຊື່ເທພະວັນ ທາງທິດເໜືອແຫ່ງເຮືອນພານຊື່ໂອປາສາທະ ພຣະສະມະນະ-ໂຄດົມຈຶ່ງຈັດວ່າເປັນແຂກຂອງເຮົາທີ່ພວກເຮົາຄວນສັກກາຣະ ເຄົາລົບ ນັບຖື ບູຊາ ດ້ວຍເຫດນີ້ ພຣະສະມະນະໂຄດົມຈຶ່ງບໍ່ຄວນສະເດັດມາຫາເຮົາ ເຮົາຕ່າງຫາກຄວນໄປເຂົ້າເຝົ້າພຣະສະມະນະໂຄດົມ ເຮົາຮູ້ພຣະຄຸນຂອງພຣະສະມະນະໂຄດົມພຽງທໍ່ນີ້ ແຕ່ພຣະສະມະນະໂຄດົມບໍ່ແມ່ນວ່າຈະມີພຣະຄຸນ ພຽງທໍ່ນີ້ ແທ້ຈິງແລ້ວ ພຣະສະມະນະໂຄດົມມີພຣະຄຸນນັບປະມານບໍ່ໄດ້ ເຖິງແມ່ນທ່ານພຣະໂຄດົມຊົງປະກອບດ້ວຍອົງຄຸນບາງຢ່າງ ກໍບໍ່ຄວນສະເດັດມາຫາເຮົາ ໂດຍແທ້ທີ່ຈິງ ເຮົາຕ່າງຫາກ ຄວນໄປເຂົ້າເຝົ້າພຣະສະມະນະໂຄດົມ”

(ຫລັງຈາກນັ້ນ) ຈັງກີພາມໄດ້ກ່າວເຊີນວ່າ "ທ່ານທັງຫລາຍ ຖ້າເຊັ່ນນັ້ນ ພວກເຮົາທັງໝົດຈັກໄປເຂົ້າເຝົ້າພຣະສະມະນະໂຄດົມນຳກັນ"

## ມານົບຊື່ກາປະທິກະທູນຖາມບົດມົນ

[໔໔໖] ຄັ້ງນັ້ນ ຈັງກີພາມພ້ອມດ້ວຍຄະນະພາມໝູ່ໃຫຍ່ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງແລ້ວຊົງປະຕິສັນຖານເລື້ອງບາງເລື້ອງພໍເປັນທີ່ຣະນຶກເຖິງກັນກັບພາມທັງຫລາຍຜູ້ແກ່ເຖົ້າ ສະໄໝນັ້ນ ມານົບຊື່ກາບທິກະຍັງເປັນໜຸ່ມແຖຫົວມີອາຍຸ ໑໖ ປີ ນັບແຕ່ເກີດມາ ເປັນຜູ້ຈົບໄຕຣເພດ ພ້ອມທັງນິກຄັນທຸສາດ ເກຕຸພະສາດອັກສອນສາດແລະປະຫວັດສາດ ເປັນຜູ້ເຂົ້າໃຈ ໂຕບົດແລະໄວຍາກອນ ຊ່ຽວຊານຄຳພີໂລກາຍະຕະສາດແລະລັກສະນະມະຫາບຸຣຸດນັ່ງຢູ່ໃນບໍລິສັດນັ້ນດ້ວຍ ເຂົາໄດ້ເວົ້າສອດຂຶ້ນໃນລະຫວ່າງທີ່ພາມທັງຫລາຍຜູ້ແກ່ເຖົ້າກຳລັງສົນທະນາກັນຢູ່ ກັບພຣະຜູ້ມີພຣະພາກເຈົ້າ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຫ້າມກາປະທິກະມານພວ່າ "ພາຣະທະວາຊະຜູ້ມີອາຍຸ ເຈົ້າຢ່າເວົ້າແຊກຂຶ້ນໃນລະຫວ່າງທີ່ພາມທັງຫລາຍຜູ້ແກ່ເຖົ້າກຳລັງສົນທະນາກັນຢູ່ ຈົ່ງຖ້າໃຫ້ເຂົາເວົ້າຈົບເສຍກ່ອນ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ຈັງກີພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ທ່ານພຣະໂຄດົມ ຢ່າຊົງຫ້າມກາປະທິກະມານົບເລີຍ ກາປະທິກະມານົບເປັນບຸດຂອງຜູ້ມີສະກຸລ ເປັນພະຫູສູດ ເປັນບັນດິດ ເຈຣາຈາຄຳເວົ້າມ່ວນ ແລະ ສາມາດຈະເຈລະຈາໂຕ້ຕອບໃນຄຳນັ້ນກັບທ່ານພຣະໂຄດົມໄດ້"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງພຣະດຳຣິວ່າ "ກາປະທິກະມານົບຈັກສຳເລັດການສຶກສາໃນປາພົດຄືໄຕຣເພດຢ່າງແນ່ນອນ ພາມທັງຫລາຍຈຶ່ງພາກັນຍ້ອງຍໍເຂົາເຖິງພຽງນັ້ນ"

ຄັ້ງນັ້ນ ກາປະທິກະມານົບໄດ້ຄິດວ່າ "ເມື່ອໃດ ພຣະສະມະນະໂຄດົມຈັກທອດພຣະເນດສົບຕາເຮົາ ເມື່ອນັ້ນ ເຮົາຈັກທູນຖາມບັນຫາກັບພຣະສະມະນະໂຄດົມ"

ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຄວາມຄິດຄຳນຶງຂອງກາປະທິກະມານົບດ້ວຍຈິດ (ຂອງພຣະອົງ) ຈຶ່ງຊົງທອດພຣະເນດໄປທາງທີ່ກາປະທິກະມານົບນັ່ງຢູ່

[໔໔໗] ຄັ້ງນັ້ນແລ ກາປະທິກະມານົບໄດ້ຄິດວ່າ "ພຣະສະມະນະໂຄດົມຊົງສົນພຣະທະໄທເຮົາຢູ່ ທາງທີ່ດີ ເຮົາຄວນທູນຖາມບັນຫາກັບພຣະສະມະນະໂຄດົມ" ລຳດັບນັ້ນ ກາປະທິກະມານົບ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ ທ່ານພຣະໂຄດົມ ໃນບົດມົນອັນເປັນຂອງເກົ່າຂອງພາມທັງຫລາຍ ໂດຍສືບຕໍ່ກັນມາຕາມຄຳພີ ພາມທັງຫລາຍຍ່ອມເຖິງຄວາມຕົກລົງໃຈໂດຍເດັດຂາດວ່າ "ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ໃນເລື້ອງນີ້ທ່ານພຣະໂຄດົມຈະຕັດແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພາຣະທະວາຊະ ບັນດາພາມທັງຫລາຍ ພາມ ຈັກຄົນໜຶ່ງຜູ້ກ່າວແນວນີ້ວ່າ "ເຮົາຮູ້ສິ່ງນີ້ ເຮົາເຫັນສິ່ງນີ້ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ມີຢູ່ບໍ"

ກາປະທິກະມານົບທູນຕອບວ່າ "ບໍ່ມີເລີຍ ທ່ານພຣະໂຄດົມ"

"ພາຣະທະວາຊະ ແມ່ນອາຈານທ່ານໜຶ່ງ ແມ່ນປາຈານຂອງອາຈານທ່ານໜຶ່ງ ຕະຫຼອດຂຶ້ນໄປຈົນ ໗ ຊົ່ວອາຈານຂອງພາມທັງຫລາຍຜູ້ກ່າວແນວນີ້ວ່າ "ເຮົາຮູ້ສິ່ງນີ້ ເຮົາເຫັນສິ່ງນີ້ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ມີຢູ່ບໍ?"

"ບໍ່ມີເລີຍ ທ່ານພຣະໂຄດົມ"

"ພາຣະທະວາຊະ ລືສີທັງຫລາຍຜູ້ເປັນບຸຣະພາຈານຂອງພວກພາມ ຄື ລືສີ ອັດຖະກະ ລືສີວາມະກະ ລືສີວາມະເທບ ລືສີເວສສາມິດຕະ ລືສີຍະມະຕັກຄີ ລືສີອັງຄີຣະສະ ລືສີພາຣະທະວາຊະ ລືສີວາເສດຖະ ລືສີກັດສະປະ ລືສີພະຄຸ ເຊິ່ງເປັນຜູ້ແຕ່ງມົນ ເປັນຜູ້ ບອກມົນທີ່ພາມທັງຫລາຍໃນປັດຈຸບັນນີ້ຂັບຕາມ ບົດມົນເກົ່າທີ່ທ່ານບຸຣະພາຈານຍ໌ພາມຂັບໄວ້ແລ້ວ ບອກໄວ້ແລ້ວ ຣິບໂຮມໄວ້ແລ້ວ ກ່າວໄດ້ຖືກຕ້ອງຕາມທີ່ທ່ານກ່າວໄວ້ ບອກໄດ້ຖືກຕ້ອງຕາມທີ່ທ່ານໄດ້ບອກໄວ້ແລ້ວ ແມ່ນທ່ານເຫຼົ່ານັ້ນກໍກ່າວແນວນີ້ວ່າ "ເຮົາທັງຫລາຍ ຮູ້ສິ່ງນີ້ ເຮົາທັງຫລາຍເຫັນສິ່ງນີ້ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ມີຢູ່ບໍ"

"ບໍ່ມີເລີຍ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພາຣະທະວາຊະ ໄດ້ຮູ້ກັນດັ່ງນີ້ວ່າ ບັນດາພາມທັງຫລາຍ ບໍ່ມີພາມແມ່ນຈັກຄົນໜຶ່ງ ຜູ້ກ່າວແນວນີ້ວ່າ "ເຮົາຮູ້ສິ່ງນີ້ ເຮົາເຫັນສິ່ງນີ້ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ບໍ່ມີໃຜຈັກຄົນໜຶ່ງເຊິ່ງເປັນອາຈານ ເປັນປາຈານຍ໌ຂອງອາຈານຕະຫຼອດ ໗ ຊົ່ວອາຈານຂອງພາມທັງຫລາຍຜູ້ກ່າວແນວນີ້ວ່າ "ເຮົາຮູ້ສິ່ງນີ້ ເຮົາເຫັນສິ່ງນີ້ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ແມ່ນລືສີທັງຫລາຍຜູ້ເປັນບຸຣະພາຈານຍ໌ຂອງພວກພາມ ຄື ລືສີອັດຖະກະ ລືສີວາມະກະ ລືສີວາມະເທບ ລືສີເວສສາມິດຕະ ລືສີ ຍົມຕັກຄີ ລືສີອັງຄີຣະສະ ລືສີພາຣະທະວາຊະ ລືສີວາເສດຖະ ລືສີກັດສະປະ ລືສີພະຄຸ ເຊິ່ງເປັນ ຜູ້ແຕ່ງມົນ ເປັນຜູ້ບອກມົນທີ່ພາມທັງຫລາຍໃນປັດຈຸບັນນີ້ຂັບຕາມ ບົດມົນເກົ່າທີ່ທ່ານຂັບໄວ້ແລ້ວ ບອກໄວ້ແລ້ວ ຣິບໂຮມໄວ້ແລ້ວ ກ່າວໄດ້ຖືກຕ້ອງ ຕາມທີ່ທ່ານໄດ້ກ່າວໄວ້ ບອກໄດ້ຖືກຕ້ອງ ຕາມທີ່ທ່ານໄດ້ບອກໄວ້ແລ້ວ ແມ່ນທ່ານເຫຼົ່ານັ້ນ

ກໍບໍ່ໄດ້ກ່າວແນວນີ້ວ່າ "ເຮົາຮູ້ສິ່ງນີ້ ເຮົາເຫັນສິ່ງນີ້ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

ທຳ ໕ ປະການມີຜົນເປັນ ໒ ແນວ

[໔໔໗] ພາຣະທະວາຊະ ຄົນຕາບອດເຂົ້າແຖວເກາະຫລັງກັນ ຄົນຢູ່ຫົວແຖວ ຄົນຢູ່ກາງແຖວ ແລະຄົນຢູ່ປາຍແຖວ ຕ່າງກໍແນມບໍ່ເຫັນກັນ ແມ່ນສັນໃດ ພາສິດຂອງພາມທັງຫລາຍກໍສັນນັ້ນຄືກັນ ເຫັນຈະປຽບໄດ້ກັບແຖວຄົນຕາບອດ ຄື ແມ້ການຢູ່ ຫົວແຖວ ຄົນຢູ່ກາງແຖວ ແລະຄົນຢູ່ປາຍແຖວ ຕ່າງກໍແນມບໍ່ເຫັນກັນ ທ່ານເຂົ້າໃຈ ຄວາມຂໍ້ນັ້ນວ່າແນວໃດ ເມື່ອເປັນເຊັ່ນນັ້ນ ຄວາມເຊື່ອຂອງພາມທັງຫລາຍຍ່ອມຫາ ມູນບໍ່ໄດ້ ບໍ່ແມ່ນບໍ"

ກາປະທິກະມານົບຂາບທູລວ່າ "ທ່ານພຣະໂຄດົມ ໃນຂໍ້ນີ້ພາມທັງຫລາຍບໍ່ແມ່ນ ຮ່ຳຮຽນກັນມາດ້ວຍຄວາມເຊື່ອແນວດຽວ ແຕ່ຮ່ຳຮຽນດ້ວຍການຟັງຕາມກັນມາ"

"ພາຣະທະວາຊະ ຄັ້ງທຳອິດທ່ານໄດ້ອ້າງເຖິງຄວາມເຊື່ອ ບັດນີ້ທ່ານອ້າງເຖິງການຟັງຕາມ ກັນມາ ທຳ ໕ ປະການນີ້ມີຜົນເປັນ ໒ ແນວໃນປັດຈຸບັນ

ທຳ ໕ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ສັດທາ | (ຄວາມເຊື່ອ) |
| ໒. ຣຸຈິ | (ຄວາມພໍໃຈ) |
| ໓. ອະນຸດສະວະ | (ການຟັງຕາມກັນມາ) |
| ໔. ອາການປະຣິວິຕົກ | (ຄວາມນຶກຕາມອາການ) |
| ໕. ທິດຖິນິດຊານຂັນຕິ | (ຄວາມເຂົ້າກັນໄດ້ກັບທິດສະດີທີ່ຄິດໄວ້) |

ທຳ ໕ ປະການນີ້ແລ ມີຜົນເປັນ ໒ ແນວໃນປັດຈຸບັນ ຄື

ສິ່ງທີ່ເຊື່ອກັນດ້ວຍດີ ແຕ່ສິ່ງນັ້ນກັບເປັນຂອງວ່າງເປົ່າເປັນຕົວະໄປກໍມີ ສິ່ງທີ່ບໍ່ເຊື່ອກັນດ້ວຍດີ ແຕ່ສິ່ງນັ້ນກັບເປັນຈິງແທ້ ບໍ່ເປັນອື່ນກໍມີ

ສິ່ງທີ່ພໍໃຈແທ້ ໆ ຯລຯ

ສິ່ງທີ່ຟັງຕາມກັນມາຢ່າງດີ ຯລຯ

ສິ່ງທີ່ນຶກໄວ້ຢ່າງດີ ຯລຯ

ສິ່ງທີ່ພິນິດໄວ້ຢ່າງດີ ແຕ່ສິ່ງນັ້ນກັບເປັນຂອງວ່າງເປົ່າເປັນຕົວະໄປກໍມີ ສິ່ງທີ່ບໍ່ໄດ້ພິນິດໄວ້ຢ່າງດີ ແຕ່ສິ່ງນັ້ນກັບເປັນຈິງແທ້ ບໍ່ເປັນອື່ນກໍມີ

ພາຣະທະວາຊະ ຄົນຜູ້ສະຫຼາດເມື່ອຈະຕາມຖືຮັກສາສັດຈະ ບໍ່ຄວນຈະຕົກລົງໃຈໃນຂໍ້ນັ້ນແນວເດັດຂາດວ່າ "ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

## ຕັດຕອບເຖິງການຖືຮັກສາສັດຈະ

[໔໘໙] ກາປະທິກະມານົບທູນຖາມວ່າ "ທ່ານພຣະໂຄດົມ ດ້ວຍຂໍ້ປະຕິບັດປະມານ ທໍ່ໃດ ການຖືຮັກສາສັດຈະຈຶ່ງມີໄດ້ ບຸກຄົນຊື່ວ່າຖືຮັກສາສັດຈະດ້ວຍຂໍ້ປະຕິບັດປະມານທໍ່ໃດ ຂ້າພະເຈົ້າຂໍທູນຖາມທ່ານພຣະໂຄດົມເຖິງການຖືຮັກສາສັດຈະ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາຣະທະວາຊະ ຖ້າບຸຣຸດມີສັດທາ ກ່າວວ່າ "ເຮົາມີສັດທາແນວນີ້" ຊື່ວ່າຖືຮັກສາສັດຈະ ແຕ່ຍັງບໍ່ຊື່ວ່າມີຄວາມຕົກລົງໃຈໂດຍເດັດຂາດວ່າ "ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ດ້ວຍຂໍ້ປະຕິບັດພຽງທໍ່ນີ້ ການຖືຮັກສາສັດຈະຍ່ອມມີໄດ້ ບຸກຄົນຊື່ວ່າຖືຮັກສາສັດຈະດ້ວຍຂໍ້ປະຕິບັດພຽງທໍ່ນີ້ ແລະ ເຮົາຍ່ອມບັນຍັດການຖືຮັກສາສັດຈະດ້ວຍຂໍ້ປະຕິບັດພຽງທໍ່ນີ້ ແຕ່ຍັງບໍ່ຊື່ວ່າເປັນການຮູ້ສັດຈະກ່ອນ

ຖ້າບຸຣຸດມີຄວາມພໍໃຈ ฯລฯ

ຖ້າບຸຣຸດມີການຟັງຕາມກັນມາ ฯລฯ

ຖ້າບຸຣຸດມີຄວາມຄິດນຶກຕາມອາການ ฯລฯ

ຖ້າບຸຣຸດມີຄວາມພິນິດທີ່ເຂົ້າກັນໄດ້ກັບທິດສະດີຂອງຕົນ ເຂົາກ່າວແນວນີ້ວ່າ "ເຮົາມີຄວາມພິນິດທີ່ເຂົ້າກັນໄດ້ກັບທິດສະດີຂອງຕົນແນວນີ້" ຊື່ວ່າຖືຮັກສາສັດຈະ ແຕ່ຍັງບໍ່ຊື່ວ່າເຖິງຄວາມຕົກລົງໃຈໂດຍເດັດຂາດວ່າ "ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

ພາຣະທະວາຊະ ດ້ວຍຂໍ້ປະຕິບັດພຽງທໍ່ນີ້ການຖືຮັກສາສັດຈະຍ່ອມມີໄດ້ ບຸກຄົນຊື່ວ່າຖືຮັກສາສັດຈະດ້ວຍຂໍ້ປະຕິບັດພຽງທໍ່ນີ້ ແລະເຮົາຍ່ອມບັນຍັດການຖືຮັກສາສັດຈະດ້ວຍຂໍ້ປະຕິບັດພຽງທໍ່ນີ້ ແຕ່ຍັງບໍ່ຊື່ວ່າເປັນການຮູ້ສັດຈະກ່ອນ"

## ຕັດຕອບເຖິງການຮູ້ສັດຈະ

[໔໙໐] ກາປະທິກະມານົບທູນຖາມວ່າ "ທ່ານພຣະໂຄດົມ ການຖືຮັກສາສັດຈະຍ່ອມມີດ້ວຍຂໍ້ປະຕິບັດພຽງທໍ່ນີ້ ບຸກຄົນຊື່ວ່າຖືຮັກສາສັດຈະດ້ວຍຂໍ້ປະຕິບັດພຽງທໍ່ນີ້ ແລະເຮົາທັງຫລາຍຍ່ອມຫວັງການຖືຮັກສາສັດຈະດ້ວຍຂໍ້ປະຕິບັດພຽງທໍ່ນີ້ ການຮູ້ສັດຈະຍ່ອມມີດ້ວຍຂໍ້ປະຕິບັດພຽງທໍ່ໃດ ບຸກຄົນຍ່ອມຮູ້ສັດຈະດ້ວຍຂໍ້ປະຕິບັດພຽງທໍ່ໃດ ຂ້າພະເຈົ້າຂໍທູນຖາມທ່ານພຣະໂຄດົມເຖິງການຮູ້ສັດຈະ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ພາຣະທະວາຊະ ພິກຂຸໃນທຳວິໄນນີ້ເຂົ້າໄປອາໄສເຮືອນຫຼືນິຄົມແຫ່ງໃດແຫ່ງໜຶ່ງຢູ່ ຄະຫະບໍດີກໍດີ ບຸດຂອງຄະຫະບໍດີກໍດີ ເຂົ້າໄປຫາພິກຂຸນັ້ນແລ້ວພິຈາຣະນາໃນທຳ ໓ ປະການ ຄື (໑) ໃນທຳທີ່ເປັນເຫດໃຫ້ເກີດໂລພະ (ຄວາມໂລບ) (໒) ໃນທຳທີ່ເປັນເຫດໃຫ້ເກີດໂທສະ(ການປະທຸດສະຮ້າຍ) (໓) ໃນທຳທີ່ເປັນເຫດໃຫ້ເກີດໂມຫະ (ຄວາມຫລົງ) ວ່າ “ທ່ານຜູ້ນີ້ມີທຳທີ່ເປັນເຫດໃຫ້ເກີດໂລພະບໍ (ຍ້ອນວ່າ) ຜູ້ມີຈິດຖືກທຳທີ່ເປັນເຫດໃຫ້ເກີດຄວາມໂລບຄອບງຳແລ້ວ ເມື່ອບໍ່ຮູ້ກໍກ່າວວ່າ “ຂ້າພະເຈົ້າຮູ້” ເມື່ອບໍ່ເຫັນກໍກ່າວວ່າ “ຂ້າພະເຈົ້າເຫັນ” ຫຼື ສິ່ງໃດຈະເພິ່ງເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກສິ້ນການລະນານແກ່ຜູ້ອື່ນ ກໍຈະເພິ່ງຊັກຊວນຜູ້ອື່ນເພື່ອປະໂຫຍດແກ່ສິ່ງນັ້ນໄດ້ຫຼືໜໍ່” ເມື່ອເຂົາພິຈາລະນາເຖິງພິກຂຸນັ້ນຢູ່ ຈຶ່ງຮູ້ໄດ້ແນວນີ້ວ່າ “ທ່ານຜູ້ນີ້ບໍ່ມີທຳທີ່ເປັນເຫດໃຫ້ເກີດ ໂລພະ (ຍ້ອນວ່າ) ຜູ້ມີຈິດ ຖືກທຳທີ່ເປັນເຫດໃຫ້ເກີດໂລພະຄອບງຳແລ້ວ ເມື່ອບໍ່ຮູ້ກໍກ່າວ ວ່າ “ຂ້າພະເຈົ້າຮູ້” ເມື່ອບໍ່ເຫັນກໍກ່າວວ່າ “ຂ້າພະເຈົ້າເຫັນ” ຫຼື ສິ່ງໃດຈະເພິ່ງເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກສິ້ນການລະນານແກ່ຜູ້ອື່ນ ທ່ານຜູ້ນີ້ເພິ່ງຊັກຊວນຜູ້ອື່ນເພື່ອປະໂຫຍດ ແກ່ສິ່ງນັ້ນ

ອັນໜຶ່ງ ທ່ານຜູ້ນີ້ມີກາຍສະມາຈານ ວະຈີສະມາຈານ ຄືຜູ້ບໍ່ໂລບ ທ່ານຜູ້ນີ້ສະແດງທຳອັນເລິກເຊິ່ງ ເຫັນໄດ້ຍາກ ຮູ້ຕາມໄດ້ຍາກ ສະງົບ ປະນີດ ຄາດຄະເນເອງບໍ່ໄດ້ ເປັນທຳລະອຽດ ຮູ້ໄດ້ສະເພາະບັນດິດ ບໍ່ແມ່ນທຳທີ່ຄົນໂລບຈະສະແດງໄດ້ງ່າຍ”

[໔໓໑] ເມື່ອໃດເຂົາພິຈາລະນາພິກຂຸນັ້ນຢູ່ ຍ່ອມເຫັນແຈ້ງວ່າ ທ່ານບໍລິສຸດຈາກ ທຳທີ່ເປັນເຫດໃຫ້ເກີດໂລພະແລ້ວ ເມື່ອນັ້ນເຂົາພິຈາລະນາພິກຂຸນັ້ນໃຫ້ຍິ່ງຂຶ້ນໄປໃນທຳທີ່ເປັນເຫດໃຫ້ເກີດໂທສະວ່າ “ທ່ານຜູ້ນີ້ມີທຳທີ່ເປັນເຫດໃຫ້ເກີດໂທສະ ມີຈິດຖືກທຳທີ່ເປັນ ເຫດໃຫ້ເກີດໂທສະຄອບງຳ ເມື່ອບໍ່ຮູ້ກໍຈະກ່າວວ່າ “ຂ້າພະເຈົ້າຮູ້” ເມື່ອບໍ່ເຫັນກໍຈະກ່າວວ່າ “ຂ້າພະເຈົ້າເຫັນ” ຫຼືສິ່ງໃດຈະເພິ່ງເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກສິ້ນການລະນານ ແກ່ຜູ້ອື່ນ ກໍຈະເພິ່ງຊັກຊວນຜູ້ອື່ນເພື່ອປະໂຫຍດແກ່ສິ່ງນັ້ນ” ເຂົາເມື່ອພິຈາລະນາພິກຂຸນັ້ນຢູ່ ຍ່ອມຮູ້ໄດ້ແນວນີ້ວ່າ “ທ່ານຜູ້ນີ້ບໍ່ມີທຳທີ່ເປັນເຫດໃຫ້ເກີດໂທສະ (ຍ້ອນວ່າ) ຜູ້ມີຈິດຖືກທຳທີ່ເປັນເຫດໃຫ້ເກີດໂທສະຄອບງຳແລ້ວ ເມື່ອບໍ່ຮູ້ກໍຈະເພິ່ງກ່າວວ່າ “ຂ້າພະເຈົ້າຮູ້” ເມື່ອບໍ່ເຫັນກໍຈະເພິ່ງກ່າວວ່າ “ຂ້າພະເຈົ້າເຫັນ” ຫຼື ສິ່ງໃດຈະເພິ່ງເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກສິ້ນການລະນານແກ່ຜູ້ອື່ນ ເພິ່ງຊັກຊວນຜູ້ອື່ນເພື່ອປະໂຫຍດແກ່ສິ່ງນັ້ນ

ອັນໜຶ່ງ ທ່ານຜູ້ນີ້ມີກາຍສະມາຈານ ວະຈີສະມາຈານ ຄື ຜູ້ບໍ່ປະທຸດສະຮ້າຍ ທ່ານຜູ້ນີ້ສະແດງທຳອັນເລິກເຊິ່ງ ເຫັນໄດ້ຍາກ ຮູ້ຕາມໄດ້ຍາກ ສະງົບ ປະນີດ ຄາດຄະເນເອງບໍ່ໄດ້ເປັນທຳລະອຽດ ຮູ້ໄດ້ສະເພາະບັນດິດ ບໍ່ແມ່ນທຳທີ່ຄົນປະທຸດສະຮ້າຍຈະສະແດງໄດ້ງ່າຍ”

[໔໓໔] ເມື່ອໃດ ເຂົາພິຈາລະນາພິກຂຸນັ້ນຢູ່ຍ່ອມເຫັນແຈ້ງວ່າ ທ່ານບໍລິສຸດຈາກທຳທີ່ເປັນເຫດໃຫ້ເກີດໂທສະ ເມື່ອນັ້ນເຂົາຍ່ອມພິຈາລະນາພິກຂຸນັ້ນໃຫ້ຍິ່ງຂຶ້ນໄປໃນທຳທີ່ເປັນເຫດໃຫ້ເກີດໂມຫະວ່າ "ທ່ານຜູ້ນີ້ມີທຳທີ່ເປັນເຫດໃຫ້ເກີດໂມຫະ ມີຈິດຖືກທຳທີ່ເປັນເຫດໃຫ້ເກີດໂມຫະຄອບງຳ ເມື່ອບໍ່ຮູ້ກໍຈະກ່າວວ່າ "ຂ້າພະເຈົ້າຮູ້" ເມື່ອບໍ່ເຫັນກໍຈະກ່າວວ່າ "ຂ້າພະເຈົ້າເຫັນ" ຫຼືສິ່ງໃດຈະເພິ່ງເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກສິ້ນການລະນານ ແກ່ຜູ້ອື່ນ ເພິ່ງຊັກຊວນຜູ້ອື່ນເພື່ອປະໂຫຍດແກ່ສິ່ງນັ້ນ" ເຂົາເມື່ອພິຈາລະນາພິກຂຸນັ້ນຢູ່ ຍ່ອມຮູ້ໄດ້ແນວນີ້ວ່າ "ທ່ານຜູ້ນີ້ບໍ່ມີທຳທີ່ເປັນເຫດໃຫ້ເກີດໂມຫະ (ຍ້ອນວ່າ)ຜູ້ມີຈິດຖືກທຳທີ່ເປັນເຫດໃຫ້ເກີດໂມຫະຄອບງຳແລ້ວເມື່ອບໍ່ຮູ້ກໍຈະເພິ່ງກ່າວວ່າ "ຂ້າພະເຈົ້າຮູ້" ເມື່ອບໍ່ເຫັນ ກໍຈະເພິ່ງກ່າວວ່າ "ຂ້າພະເຈົ້າເຫັນ" ຫຼືສິ່ງໃດຈະເພິ່ງເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກສິ້ນການລະນານແກ່ຜູ້ອື່ນ ເພິ່ງຊັກຊວນ ຜູ້ອື່ນເພື່ອປະໂຫຍດແກ່ສິ່ງນັ້ນ

ອັນໜຶ່ງ ທ່ານຜູ້ນີ້ມີກາຍສະມາຈານ ວະຈີສະມາຈານ ຄືຜູ້ບໍ່ຫລົງ ທ່ານຜູ້ນີ້ສະແດງທຳອັນເລິກເຊິ່ງ ເຫັນໄດ້ຍາກ ຮູ້ຕາມໄດ້ຍາກ ສະງົບ ປະນີດ ຄາດຄະເນເອງບໍ່ໄດ້ ເປັນທຳລະອຽດ ຮູ້ໄດ້ສະເພາະບັນດິດ ບໍ່ແມ່ນທຳທີ່ຄົນຫລົງຈະສະແດງໄດ້ງ່າຍ"

ເມື່ອໃດ ເຂົາພິຈາລະນາພິກຂຸນັ້ນຢູ່ ຍ່ອມເຫັນແຈ້ງວ່າທ່ານບໍລິສຸດຈາກທຳທີ່ເປັນເຫດໃຫ້ເກີດໂມຫະ ເມື່ອນັ້ນ ເຂົາສ້າງສັດທາໃນພິກຂຸນັ້ນແນວໝັ້ນຄົງ ຈຶ່ງເກີດສັດທາແລ້ວ ເຂົ້າໄປຫາ ເມື່ອເຂົ້າໄປຫາ ຍ່ອມນັ່ງໃກ້ ເມື່ອນັ່ງໃກ້ ຍ່ອມງ່ຽງໂສດລົງ ເຂົາງ່ຽງໂສດລົງແລ້ວຟັງທຳອຢູ່ຍ່ອມຊົງຈຳທຳ ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ແລ້ວ ເມື່ອພິຈາລະນາເນື້ອຄວາມຢູ່ທຳທັງຫລາຍຍ່ອມຄວນແກ່ການເພ່ງພິນິດ ເມື່ອທຳຄວນ ແກ່ການເພ່ງພິນິດມີຢູ່ ສັນທະຍ່ອມເກີດ ເກີດສັນທະແລ້ວ ຍ່ອມອຸດສາຫະ ເມື່ອອຸດສາຫະ ແລ້ວຍ່ອມພິຈາລະນາ ເມື່ອພິຈາລະນາແລ້ວ ຍ່ອມຕັ້ງຄວາມພຽນ ທ່ານຕັ້ງຄວາມພຽນແລ້ວ ຍ່ອມເຮັດປະຣະມັດຖະສັຈຈະໃຫ້ແຈ້ງດ້ວຍກາຍ ແລະ ເຫັນແຈ້ງປະຣະມັດຖະສັດຈະນັ້ນດ້ວຍປັນຍາ

ພາຣະທະວາຊະ ດ້ວຍຂໍ້ປະຕິບັດພຽງທີ່ນີ້ ການຮູ້ສັດຈະຈຶ່ງມີໄດ້ ດ້ວຍຂໍ້ປະຕິບັດພຽງ ທີ່ນີ້ແລ ບຸກຄົນຍ່ອມຮູ້ສັດຈະໄດ້ ແລະ ເຮົາຍ່ອມບັນຍັດການຮູ້ສັດຈະດ້ວຍຂໍ້ປະຕິບັດພຽງ ທີ່ນີ້ ແຕ່ຍັງບໍ່ຊື່ວ່າເປັນການບັນລຸສັດຈະຢ່າງແນ່ນອນ"

## ຕັດຕອບເຖິງການບັນລຸສັດຈະ

[໔໓໓] ກາປະທິກະມານົບທູນຖາມວ່າ "ທ່ານພຣະໂຄດົມ ການຮູ້ສັດຈະຍ່ອມມີໄດ້ດ້ວຍຂໍ້ປະຕິບັດພຽງທີ່ນີ້ ບຸກຄົນຊື່ວ່າຮູ້ສັດຈະດ້ວຍຂໍ້ປະຕິບັດພຽງທີ່ນີ້ ແລະເຮົາທັງຫລາຍຍ່ອມຫວັງການຮູ້ສັດຈະດ້ວຍຂໍ້ປະຕິບັດພຽງທີ່ນີ້ຫຼື ການບັນລຸສັດຈະຍ່ອມມີໄດ້ດ້ວຍຂໍ້ປະຕິບັດພຽງທີ່ໃດ

ບຸກຄົນຍ່ອມບັນລຸສັດຈະດ້ວຍຂໍ້ປະຕິບັດພຽງທີ່ໃດ ຂ້າພະເຈົ້າຂໍທູນຖາມທ່ານພຣະໂຄດົມເຖິງການບັນລຸສັດຈະ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາຣະທະວາຊະ ການປະຕິບັດ ຈະເລີນ ເຮັດໃຫ້ຫຼາຍເຊິ່ງທຳເຫຼົ່ານັ້ນ ຊື່ວ່າເປັນການບັນລຸສັດຈະ ດ້ວຍຂໍ້ປະຕິບັດພຽງທີ່ນີ້ ການບັນລຸສັດຈະຍ່ອມມີໄດ້ ບຸກຄົນຍ່ອມບັນລຸສັດຈະດ້ວຍຂໍ້ປະຕິບັດພຽງທີ່ນີ້ ແລະເຮົາຍ່ອມບັນຍັດການບັນລຸສັດຈະດ້ວຍຂໍ້ປະຕິບັດພຽງທີ່ນີ້"

## ຕັດຕອບເຖິງທຳມີອຸປະກາຣະຫຼາຍ

[໔໓໔] ກາປະທິກະມານົບທູນຖາມວ່າ "ທ່ານພຣະໂຄດົມ ການບັນລຸສັດຈະຍ່ອມມີໄດ້ດ້ວຍຂໍ້ປະຕິບັດພຽງທີ່ນີ້ ບຸກຄົນຍ່ອມບັນລຸສັດຈະດ້ວຍຂໍ້ປະຕິບັດພຽງທີ່ນີ້ ແລະເຮົາທັງຫລາຍຍ່ອມຫວັງການບັນລຸສັດຈະດ້ວຍຂໍ້ປະຕິບັດພຽງທີ່ນີ້ບໍ? ທຳມີອຸປະກາຣະຫຼາຍແກ່ການບັນລຸສັດຈະເປັນແນວໃດ? ຂ້າພະເຈົ້າຂໍທູນຖາມທ່ານພຣະໂຄດົມເຖິງທຳມີອຸປະກາຣະຫຼາຍແກ່ການບັນລຸສັດຈະ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາຣະທະວາຊະ ຄວາມພຽນມີອຸປະກາຣະຫຼາຍແກ່ການບັນລຸສັດຈະ ຖ້າບຸກຄົນບໍ່ຕັ້ງຄວາມພຽນນັ້ນໄວ້ ກໍຈຶ່ງຈະບໍ່ບັນລຸສັດຈະນີ້ໄດ້ ແຕ່ຍ້ອນເຂົາຕັ້ງຄວາມພຽນໄວ້ຈຶ່ງບັນລຸສັດຈະໄດ້ ສັນນັ້ນ ຄວາມພຽນຈຶ່ງມີອຸປະກາຣະຫຼາຍແກ່ການບັນລຸສັດຈະ"

"ທຳມີອຸປະກາຣະຫຼາຍແກ່ຄວາມພຽນເປັນແນວໃດ? ຂ້າພຣະອົງຂໍທູນຖາມທ່ານ ພຣະໂຄດົມເຖິງທຳມີອຸປະກາຣະຫຼາຍແກ່ຄວາມພຽນ ຂ້ານ້ອຍ"

"ປັນຍາເຄື່ອງພິຈາລະນາມີອຸປະກາຣະຫຼາຍແກ່ຄວາມພຽນ ຖ້າບຸກຄົນບໍ່ພິຈາລະນາປັນຍາ ເຄື່ອງພິຈາລະນານັ້ນກໍຈະເພິ່ງຕັ້ງຄວາມພຽນນີ້ໄວ້ບໍ່ໄດ້ ແຕ່ຍ້ອນເຂົາພິຈາລະນາຈຶ່ງຕັ້ງຄວາມພຽນ ໄວ້ໄດ້ ສັນນັ້ນ ປັນຍາເຄື່ອງພິຈາລະນາຈຶ່ງມີອຸປະກາຣະຫຼາຍແກ່ຄວາມພຽນ"

"ທຳມີອຸປະກາຣະຫຼາຍແກ່ປັນຍາເຄື່ອງພິຈາລະນາເປັນແນວໃດ? ຂ້າພຣະອົງຂໍທູນຖາມທ່ານພຣະໂຄດົມເຖິງທຳມີອຸປະກາຣະຫຼາຍແກ່ປັນຍາເຄື່ອງພິຈາລະນາ ຂ້ານ້ອຍ"

"ຄວາມອຸດສາຫະມີອຸປະກາຣະຫຼາຍແກ່ປັນຍາເຄື່ອງພິຈາລະນາ ຖ້າບຸກຄົນບໍ່ອຸດສາຫະກໍຈະເພິ່ງພິຈາລະນາບໍ່ໄດ້ ແຕ່ຍ້ອນເຂົາອຸດສາຫະຈຶ່ງພິຈາລະນາໄດ້ ສັນນັ້ນ ຄວາມອຸດສາຫະຈຶ່ງມີອຸປະກາຣະຫຼາຍແກ່ປັນຍາເຄື່ອງພິຈາລະນາ"

"ທຳມີອຸປະກາຣະຫຼາຍແກ່ຄວາມອຸດສາຫະເປັນແນວໃດ? ຂ້າພຣະອົງຂໍທູນຖາມທ່ານພຣະໂຄດົມເຖິງທຳມີອຸປະກາຣະຫຼາຍແກ່ຄວາມອຸດສາຫະ ຂ້ານ້ອຍ"

"ສັນທະມີອຸປະກາຣະຫຼາຍແກ່ຄວາມອຸດສາຫະ ຖ້າສັນທະບໍ່ເກີດ ບຸກຄົນກໍຈຶ່ງຈະບໍ່ອຸດສາຫະ ແຕ່ຍ້ອນສັນທະເກີດ ເຂົາຈຶ່ງອຸດສາຫະ ສັນນັ້ນ ສັນທະຈຶ່ງມີອຸປະກາຣະຫຼາຍແກ່ຄວາມອຸດສາຫະ"

"ທຳມີອຸປະກາຣະຫຼາຍແກ່ສັນທະເປັນແນວໃດ? ຂ້າພຣະອົງຂໍທູນຖາມທ່ານພຣະໂຄດົມເຖິງທຳມີອຸປະກາຣະຫຼາຍແກ່ສັນທະ ຂ້ານ້ອຍ"

"ຄວາມຄວນແກ່ການເພ່ງພິນິດແຫ່ງທຳເປັນທຳມີອຸປະກາຣະຫຼາຍແກ່ສັນທະ ຖ້າທຳທັງຫລາຍບໍ່ຄວນແກ່ການເພ່ງພິນິດ ສັນທະກໍບໍ່ເກີດ ແຕ່ຍ້ອນທຳທັງຫລາຍຄວນແກ່ການເພ່ງພິນິດ ສັນທະຈຶ່ງເກີດ ສັນນັ້ນ ຄວາມຄວນແກ່ການເພ່ງພິນິດແຫ່ງທຳຈຶ່ງມີອຸປະກາຣະຫຼາຍແກ່ສັນທະ"

"ທຳມີອຸປະກາຣະຫຼາຍແກ່ຄວາມຄວນແກ່ການເພ່ງພິນິດແຫ່ງທຳເປັນແນວໃດ? ຂ້າພຣະອົງຂໍທູນຖາມທ່ານພຣະໂຄດົມເຖິງທຳມີອຸປະກາຣະຫຼາຍແກ່ຄວາມຄວນແກ່ການເພ່ງພິນິດ ແຫ່ງທຳ ຂ້ານ້ອຍ"

"ປັນຍາເຄື່ອງຮິ່ນຕອງເນື້ອຄວາມເປັນທຳມີອຸປະກາຣະຫຼາຍ ແກ່ຄວາມຄວນແກ່ການເພ່ງພິນິດແຫ່ງທຳ ຖ້າບຸກຄົນບໍ່ຮິ່ນຕອງເນື້ອຄວາມ ທຳທັງຫລາຍກໍຈຶ່ງຈະບໍ່ຄວນແກ່ການເພ່ງພິນິດ ແຕ່ຍ້ອນເຂົາຮິ່ນຕອງເນື້ອຄວາມ ທຳທັງຫລາຍຈຶ່ງຄວນແກ່ການເພ່ງພິນິດ ສັນນັ້ນ ປັນຍາເຄື່ອງຮິ່ນຕອງເນື້ອຄວາມຈຶ່ງມີອຸປະກາຣະຫຼາຍແກ່ຄວາມຄວນແກ່ການເພ່ງພິນິດ ແຫ່ງທຳ"

"ທຳມີອຸປະກາຣະຫຼາຍແກ່ປັນຍາເຄື່ອງຮິ່ນຕອງເນື້ອຄວາມເປັນແນວໃດ? ຂ້າພຣະອົງຂໍທູນຖາມທ່ານພຣະໂຄດົມເຖິງທຳມີອຸປະກາຣະຫຼາຍ ແກ່ປັນຍາເຄື່ອງຮິ່ນຕອງເນື້ອຄວາມ ຂ້ານ້ອຍ"

"ການຊົງຈຳທຳມີອຸປະກາຣະຫຼາຍແກ່ປັນຍາເຄື່ອງຮິ່ນຕອງເນື້ອຄວາມ ຖ້າບຸກຄົນບໍ່ຊົງຈຳທຳນັ້ນ ກໍຈະເພິ່ງຮິ່ນຕອງເນື້ອຄວາມນີ້ບໍ່ໄດ້ ແຕ່ຍ້ອນເຂົາຊົງຈຳທຳໄວ້ໄດ້ ຈຶ່ງຮິ່ນຕອງເນື້ອຄວາມໄດ້ ສັນນັ້ນ ການຊົງຈຳທຳຈຶ່ງມີອຸປະກາຣະຫຼາຍແກ່ປັນຍາເຄື່ອງຮິ່ນຕອງເນື້ອຄວາມ"

"ທຳມີອຸປະກາຣະແກ່ການຊົງຈຳທຳເປັນແນວໃດ? ຂ້າພຣະອົງຂໍທູນຖາມທ່ານພຣະໂຄດົມເຖິງທຳມີອຸປະກາຣະຫຼາຍແກ່ການຊົງຈຳທຳ ຂ້ານ້ອຍ"

"ການຟັງທຳມີອຸປະການະຫຼາຍແກ່ການຊົງຈຳທຳ ຖ້າບຸກຄົນບໍ່ຟັງທຳນັ້ນ ກໍຈະເພິ່ງຊົງຈຳທຳນີ້ບໍ່ໄດ້ ແຕ່ຍ້ອນເຂົາຟັງທຳຈຶ່ງຊົງຈຳທຳໄວ້ໄດ້ ສັນນັ້ນ ການຟັງທຳຈຶ່ງມີອຸປະການະຫຼາຍແກ່ການຊົງຈຳທຳ"

"ທຳມີອຸປະການະຫຼາຍແກ່ການຟັງທຳເປັນແນວໃດ? ຂ້າພຣະອົງຂໍທູນຖາມທ່ານພຣະໂຄດົມເຖິງທຳມີອຸປະການະຫຼາຍແກ່ການຟັງທຳ ຂ້ານ້ອຍ"

"ການງ່ຽງໂສດລົງມີອຸປະການະຫຼາຍແກ່ການຟັງທຳ ຖ້າບຸກຄົນບໍ່ງ່ຽງໂສດລົງ ກໍຈະເພິ່ງຟັງທຳນີ້ບໍ່ໄດ້ ແຕ່ຍ້ອນເຂົາງ່ຽງໂສດລົງຈຶ່ງຟັງທຳໄດ້ ສັນນັ້ນ ການງ່ຽງໂສດລົງຈຶ່ງມີອຸປະການະຫຼາຍແກ່ການຟັງທຳ"

"ທຳມີອຸປະການະຫຼາຍແກ່ການງ່ຽງໂສດລົງເປັນແນວໃດ? ຂ້າພຣະອົງຂໍທູນຖາມທ່ານພຣະໂຄດົມເຖິງທຳມີອຸປະການະຫຼາຍແກ່ການງ່ຽງໂສດລົງ ຂ້ານ້ອຍ"

"ການເຂົ້າໄປນັ່ງໃກ້ມີອຸປະການະຫຼາຍແກ່ການງ່ຽງໂສດລົງ ຖ້າບຸກຄົນບໍ່ເຂົ້າໄປນັ່ງໃກ້ ກໍຈະເພິ່ງງ່ຽງໂສດລົງບໍ່ໄດ້ ແຕ່ຍ້ອນເຂົາເຂົ້າໄປນັ່ງໃກ້ຈຶ່ງງ່ຽງໂສດລົງໄດ້ ສັນນັ້ນ ການເຂົ້າໄປນັ່ງໃກ້ຈຶ່ງມີອຸປະການະຫຼາຍແກ່ການງ່ຽງໂສດລົງ"

"ທຳມີອຸປະການະຫຼາຍແກ່ການເຂົ້າໄປນັ່ງໃກ້ເປັນແນວໃດ? ຂ້າພຣະອົງຂໍທູນຖາມທ່ານພຣະໂຄດົມເຖິງທຳມີອຸປະການະຫຼາຍແກ່ການເຂົ້າໄປນັ່ງໃກ້ ຂ້ານ້ອຍ"

"ການເຂົ້າໄປຫາມີອຸປະການະຫຼາຍແກ່ການເຂົ້າໄປນັ່ງໃກ້ ຖ້າບຸກຄົນບໍ່ເຂົ້າໄປຫາ ກໍຈະເພິ່ງນັ່ງໃກ້ບໍ່ໄດ້ ຍ້ອນເຂົາເຂົ້າໄປຫາຈຶ່ງນັ່ງໃກ້ໄດ້ ສັນນັ້ນ ການເຂົ້າໄປຫາຈຶ່ງມີອຸປະການະຫຼາຍແກ່ການເຂົ້າໄປນັ່ງໃກ້"

"ທ່ານພຣະໂຄດົມ ທຳມີອຸປະການະຫຼາຍແກ່ການເຂົ້າໄປຫາເປັນແນວໃດ? ຂ້າພຣະອົງຂໍທູນຖາມທ່ານພຣະໂຄດົມເຖິງທຳມີອຸປະການະຫຼາຍແກ່ການເຂົ້າໄປຫາ"

"ພາຣະທະວາຊະ ສັດທາມີອຸປະການະຫຼາຍແກ່ການເຂົ້າໄປຫາ ຖ້າສັດທາບໍ່ເກີດ ບຸກຄົນກໍຈຶ່ງຈະບໍ່ເຂົ້າໄປຫາ ແຕ່ຍ້ອນສັດທາເກີດ ເຂົາຈຶ່ງເຂົ້າໄປຫາ ສັນນັ້ນ ສັດທາຈຶ່ງມີອຸປະການະຫຼາຍແກ່ການເຂົ້າໄປຫາ"

[໔໓໕] ກາປະທິກະມານົບຂາບທູລວ່າ "ຂ້າພຣະອົງໄດ້ທູນຖາມທ່ານພຣະໂຄດົມ ເຖິງການຖືຮັກສາສັດຈະ ທ່ານພຣະໂຄດົມໄດ້ຕັດຕອບການຖືຮັກສາສັດຈະແລ້ວ ແລະຂໍ້ທີ່ຕັດຕອບນັ້ນຂ້າພຣະອົງພໍໃຈແລະຖືກໃຈຫຼາຍ ແລະ ຂ້າພຣະອົງກໍຊົມຊື່ນດ້ວຍຂໍ້ທີ່ຕັດຕອບນັ້ນ

ຂ້າພຣະອົງໄດ້ທູນຖາມທ່ານພຣະໂຄດົມເຖິງການຮູ້ສັດຈະ ທ່ານພຣະໂຄດົມໄດ້ຕັດຕອບການຮູ້ສັດຈະແລ້ວ ແລະຂໍ້ທີ່ຕັດຕອບນັ້ນຂ້າພຣະອົງພໍໃຈແລະຖືກໃຈຫຼາຍ ແລະຂ້າພຣະອົງກໍຊົມຊື່ນດ້ວຍຂໍ້ທີ່ຕັດຕອບນັ້ນ

ຂ້າພຣະອົງໄດ້ທູນຖາມທ່ານພຣະໂຄດົມເຖິງການບັນລຸສັດຈະ ທ່ານພຣະໂຄດົມກໍໄດ້ ຕັດຕອບການບັນລຸສັດຈະແລ້ວ ແລະຂໍ້ທີ່ຕັດຕອບນັ້ນ ຂ້າພຣະອົງພໍໃຈແລະຖືກໃຈຫຼາຍ ແລະຂ້າພຣະອົງກໍຊື່ນຊົມດ້ວຍຂໍ້ທີ່ຕັດຕອບນັ້ນ

ຂ້າພຣະອົງໄດ້ທູນຖາມທ່ານພຣະໂຄດົມເຖິງທຳມີອຸປະການະຫຼາຍແກ່ການບັນລຸສັດຈະ ທ່ານພຣະໂຄດົມກໍໄດ້ຕັດຕອບທຳມີອຸປະການະຫຼາຍແກ່ການບັນລຸສັດຈະແລ້ວ ແລະຂໍ້ທີ່ຕັດຕອບນັ້ນ ຂ້າພຣະອົງພໍໃຈແລະຖືກໃຈຫຼາຍ ແລະຂ້າພຣະອົງກໍຊົມຊື່ນດ້ວຍຂໍ້ທີ່ຕັດ ຕອບນັ້ນ

ຂ້າພຣະອົງໄດ້ທູນຖາມທ່ານພຣະໂຄດົມເຖິງບັນຫາຂໍ້ໃດ ໆ ທ່ານພຣະໂຄດົມກໍໄດ້ຕັດຕອບ ບັນຫາຂໍ້ນັ້ນ ໆ ແລ້ວ ແລະຂໍ້ທີ່ຕັດຕອບນັ້ນຂ້າພຣະອົງພໍໃຈແລະຖືກໃຈຫຼາຍ ແລະຂ້າພຣະອົງກໍຊົມຊື່ນດ້ວຍຂໍ້ທີ່ຕັດຕອບນັ້ນ

ຂ້າແດ່ ທ່ານພຣະໂຄດົມ ແຕ່ກ່ອນຂ້າພຣະອົງຮູ້ແນວນີ້ວ່າ "ພວກສະມະນະໂລ້ນເຫລົ່ານີ້ເປັນສາມັນຊົນ ເກີດຈາກພຣະບາດຂອງພຣະພົມເປັນກັນຫະຊາດ (ວັນນະສູດ) ເປັນໃຜກັນ ແລະຈະຮູ້ທົ່ວເຖິງທຳໄດ້ແນວໃດ ທ່ານພຣະໂຄດົມໄດ້ຊົງເຮັດໃຫ້ຂ້າພຣະອົງເກີດຄວາມຮັກສະມະນະໃນໝູ່ສະມະນະ ໃຫ້ເກີດຄວາມເຫຼື້ອມໃສສະມະນະໃນໝູ່ສະມະນະ ແລະໃຫ້ເກີດຄວາມເຄົາລົບສະມະນະໃນໝູ່ສະມະນະແລ້ວນໍ" ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ໆລໆ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" ດັ່ງນີ້ແລ

**ຈັງກີສູດທີ່ ໕ ຈົບ**

# ໖. ເອສຸກາຣີສູດ

## ວ່າດ້ວຍພາມຊື່ເອສຸກາຣີ

[໔໓໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເຊຕະວັນ ອາຮາມຂອງອະນາຖະບິນ

ທີກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ພາມຊື່ເອສຸກາຣີໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກ ເຈົ້າຮອດບ່ອນຢູ່ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ໄດ້ນັ່ງຢູ່ ບ່ອນທີ່ສົມຄວນ

## ການປົນເປີ ໔ ປະເພດ

ເອສຸກາຣີພາມ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ທ່ານພຣະໂຄດົມ ພາມທັງຫລາຍ ບັນຍັດການປົນເປີໄວ້ ໔ ປະເພດ ຄື

໑. ບັນຍັດການປົນເປີພາມ
໒. ບັນຍັດການປົນເປີແພດ
໓. ບັນຍັດການປົນເປີກະສັດ
໔. ບັນຍັດການປົນເປີສູດ

ໃນການປົນເປີທັງ ໔ ປະເພດນັ້ນ ພາມທັງຫລາຍບັນຍັດການປົນເປີພາມ ໄວ້ວ່າ "ພາມ ຄວນປົນເປີພາມ ກະສັດຄວນປົນເປີພາມ ແພດຄວນປົນເປີພາມ ຫຼື ສູດຄວນປົນເປີພາມ" ພາມ ທັງຫລາຍບັນຍັດການປົນເປີພາມ ໄວ້ເຊັ່ນນີ້ແລ

ພາມທັງຫລາຍບັນຍັດການປົນເປີກະສັດໄວ້ວ່າ "ກະສັດຄວນປົນເປີກະສັດ ແພດຄວນ ປົນເປີກະສັດ ຫຼື ສູດຄວນປົນເປີກະສັດ" ພາມທັງຫລາຍບັນຍັດການປົນເປີກະສັດໄວ້ເຊັ່ນນີ້ແລ

ພາມທັງຫລາຍບັນຍັດການປົນເປີແພດໄວ້ວ່າ "ແພດຄວນປົນເປີແພດ ຫຼື ສູດຄວນປົນ ເປີແພດ" ພາມທັງຫລາຍບັນຍັດການປົນເປີແພດໄວ້ເຊັ່ນນີ້ແລ

ພາມທັງຫລາຍບັນຍັດການປົນເປີສູດໄວ້ວ່າ "ສູດທໍ່ນັ້ນຄວນປົນເປີສູດ ຜູ້ອື່ນໃຜນໍຈັກປົນ ເປີສູດ" ພາມທັງຫລາຍບັນຍັດການປົນເປີສູດໄວ້ເຊັ່ນນີ້ແລ

ທ່ານພຣະໂຄດົມ ພາມທັງຫລາຍບັນຍັດການປົນເປີໄວ້ ໔ ປະເພດນີ້ ທ່ານ ພຣະໂຄດົມ ຕັດການປົນເປີນີ້ໄວ້ແນວໃດ"

[໔໑໗] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພາມ ຊາວໂລກທັງປວງເຫັນດ້ວຍກັບຄຳ ຂອງພາມທີ່ວ່າ "ພາມທັງຫລາຍບັນຍັດການປົນເປີໄວ້ ໔ ປະເພດທໍ່ນີ້ບໍ?"

ເອສຸກາຣີພາມ ທູນຕອບວ່າ "ບໍ່ແມ່ນ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ບຸຣຸດຜູ້ຂັດສົນ ບໍ່ມີຊັບສິນແນວໃດເປັນຂອງຕົນ ຍາກຈົນ ຊົນທັງຫລາຍແຂວນກ້ອນເນື້ອທີ່ອາບຢາພິດໄວ້ສຳລັບເຂົາເຊິ່ງບໍ່ມັກພໍກັນ ໂດຍແກ້ງ ເວົ້າວ່າ "ພໍ່ທ່ານ ເຊີນທ່ານກິນຊີ້ນນີ້ ແຕ່ຕ້ອງຈ່າຍຄ່າຊີ້ນເພີ່ມຂຶ້ນ" ແມ່ນສັນໃດ ພາມທັງຫລາຍ

ບັນຍັດການປິນເປີໄວ້ ໔ ປະເພດແກ່ສະມະນະພາມເຫຼົ່ານັ້ນ ຝ່າຍດຽວ ໂດຍບໍ່ມີຝ່າຍອື່ນຍິນຍອມ ສັນນັ້ນຄືກັນ ເຮົາບໍ່ກ່າວວ່າ "ສິ່ງທັງປວງ ຄວນປິນເປີ" ແຕ່ກໍບໍ່ກ່າວວ່າ "ສິ່ງທັງປວງບໍ່ຄວນປິນເປີ" ຍ້ອນວ່າ ເມື່ອບຸກຄົນປິນເປີ ສິ່ງໃດຢູ່ ຍ້ອນເຫດແຫ່ງການປິນເປີສິ່ງນັ້ນເພີ່ງມີແຕ່ຄວາມຊົ່ວ ບໍ່ມີຄວາມດີເລີຍ ເຮົາຈຶ່ງບໍ່ ກ່າວວ່າ "ສິ່ງນັ້ນຄວນປິນເປີ" ແຕ່ເມື່ອບຸກຄົນປິນເປີສິ່ງໃດຍ້ອນເຫດແຫ່ງການປິນເປີສິ່ງນັ້ນ ເພີ່ງມີແຕ່ຄວາມດີທີ່ນັ້ນ ບໍ່ມີຄວາມຊົ່ວເລີຍ ເຮົາຈຶ່ງກ່າວວ່າ "ສິ່ງນັ້ນຄວນປິນເປີ"

ຖ້າແມ່ນຊົນທັງຫລາຍຈະເພິ່ງຖາມກະສັດແນວນີ້ວ່າ "ເມື່ອທ່ານປິນເປີສິ່ງໃດຢູ່ ຍ້ອນເຫດແຫ່ງການປິນເປີສິ່ງນັ້ນເພີ່ງມີແຕ່ຄວາມຊົ່ວ ບໍ່ມີຄວາມດີເລີຍ ຫຼືວ່າເມື່ອທ່ານປິນເປີ ສິ່ງໃດຢູ່ ຍ້ອນເຫດແຫ່ງການປິນເປີສິ່ງນັ້ນເພີ່ງມີແຕ່ຄວາມດີ ບໍ່ມີຄວາມຊົ່ວເລີຍ ໃນກໍລະນີ ແນວນີ້ທ່ານຄວນປິນເປີສິ່ງໃດ" ກະສັດເມື່ອຈະຕັດຕອບໃຫ້ຖືກຕ້ອງ ຄວນຕັດຕອບແນວນີ້ວ່າ "ເມື່ອຂ້າພະເຈົ້າປິນເປີສິ່ງໃດຢູ່ ຍ້ອນເຫດແຫ່ງການປິນເປີສິ່ງນັ້ນເພີ່ງມີແຕ່ຄວາມຊົ່ວ ບໍ່ມີຄວາມດີເລີຍ ຂ້າພະເຈົ້າບໍ່ຄວນປິນເປີສິ່ງນັ້ນ ແຕ່ເມື່ອຂ້າພະເຈົ້າປິນເປີສິ່ງໃດຢູ່ ຍ້ອນເຫດແຫ່ງການປິນເປີສິ່ງນັ້ນເພີ່ງມີແຕ່ຄວາມດີ ບໍ່ມີຄວາມຊົ່ວເລີຍ ຂ້າພະເຈົ້າຄວນປິນເປີສິ່ງນັ້ນ"

ຖ້າແມ່ນຊົນທັງຫລາຍເພິ່ງຖາມ ພາມ ຯລຯ

ຖ້າແມ່ນຊົນທັງຫລາຍເພິ່ງຖາມ ແພດ ຯລຯ

ຖ້າແມ່ນຊົນທັງຫລາຍເພິ່ງຖາມສູດແນວນີ້ວ່າ "ເມື່ອທ່ານປິນເປີສິ່ງໃດຢູ່ ຍ້ອນເຫດແຫ່ງການປິນເປີສິ່ງນັ້ນເພີ່ງມີແຕ່ຄວາມຊົ່ວ ບໍ່ມີຄວາມດີເລີຍ ຫຼື ວ່າເມື່ອທ່ານປິນເປີສິ່ງໃດຢູ່ ຍ້ອນເຫດແຫ່ງການປິນເປີສິ່ງນັ້ນ ເພີ່ງມີແຕ່ຄວາມດີ ບໍ່ມີຄວາມຊົ່ວເລີຍ ໃນກໍລະນີແນວນີ້ທ່ານຄວນປິນເປີສິ່ງໃດ" ແມ່ນສູດເມື່ອຈະຕອບໃຫ້ຖືກຕ້ອງ ຄວນຕອບແນວນີ້ວ່າ "ເມື່ອຂ້າພະເຈົ້າປິນເປີສິ່ງໃດຢູ່ ຍ້ອນເຫດແຫ່ງການປິນເປີສິ່ງນັ້ນເພີ່ງມີແຕ່ຄວາມຊົ່ວ ບໍ່ມີຄວາມດີເລີຍ ຂ້າພະເຈົ້າບໍ່ຄວນປິນເປີສິ່ງນັ້ນ ແຕ່ເມື່ອຂ້າພະເຈົ້າປິນເປີສິ່ງໃດຢູ່ ຍ້ອນເຫດແຫ່ງການປິນເປີ ສິ່ງນັ້ນເພີ່ງມີແຕ່ຄວາມດີທີ່ນັ້ນ ບໍ່ມີຄວາມຊົ່ວເລີຍ ຂ້າພະເຈົ້າຄວນປິນເປີສິ່ງນັ້ນ"

ເຮົາຈະກ່າວວ່າ "ບຸກຄົນເປັນຜູ້ປະເສີດຍ້ອນເກີດໃນຕະກູນສູງ" ກໍບໍ່ແມ່ນ ຈະກ່າວ ວ່າ "ເຂົາເປັນຜູ້ຊົ່ວຊາມຍ້ອນເກີດໃນຕະກູນສູງ" ກໍບໍ່ແມ່ນ ຈະກ່າວວ່າ "ບຸກຄົນເປັນ ຜູ້ປະເສີດຍ້ອນຄວາມເປັນຜູ້ມີວັນນະອັນຍິ່ງ" ກໍບໍ່ແມ່ນ ຈະກ່າວວ່າ "ເຂົາເປັນຜູ້ຊົ່ວຊາມຍ້ອນຄວາມເປັນຜູ້ມີວັນນະອັນຍິ່ງ" ກໍບໍ່ແມ່ນ ເຮົາກ່າວວ່າ "ບຸກຄົນເປັນຜູ້ປະເສີດ ຍ້ອນຄວາມເປັນຜູ້ມີໂພຄະຫຼາຍ" ກໍບໍ່ແມ່ນ ແຕ່ຈະກ່າວວ່າ "ເຂົາເປັນຜູ້ຊົ່ວຊາມ ຍ້ອນຄວາມ ເປັນຜູ້ມີໂພຄະຫຼາຍ" ກໍບໍ່ແມ່ນ

[໔໓໗] ພາມ ຍ້ອນບຸກຄົນລາງຄົນໃນໂລກນີ້ ແມ່ນເກີດໃນຕະກູນສູງກໍຍັງເປັນ ຜູ້ຂ້າສັດ

ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເປັນຜູ້ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດພະຍາບາດ ເປັນມິດສາທິດຖິ ຍ້ອນແນວນັ້ນ ເຮົາຈຶ່ງບໍ່ກ່າວວ່າ "ເຂົາເປັນຜູ້ປະເສີດຍ້ອນເກີດໃນຕະກູນສູງ"

ແຕ່ບຸກຄົນລາງຄົນໃນໂລກນີ້ ແມ່ນເກີດໃນຕະກູນສູງກໍຍັງເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການ ເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການ ເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຍ້ອນແນວນັ້ນ ເຮົາຈຶ່ງບໍ່ກ່າວວ່າ "ເຂົາເປັນຜູ້ຊົ່ວຊາມ ຍ້ອນເກີດໃນຕະກູນສູງ"

[໔໓໙] ພາມ ຍ້ອນບຸກຄົນລາງຄົນໃນໂລກນີ້ ແມ່ນມີວັນນະສູງກໍຍັງເປັນຜູ້ ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດພະຍາບາດ ເປັນມິດສາທິດຖິ ຍ້ອນແນວນັ້ນ ເຮົາຈຶ່ງ ບໍ່ກ່າວວ່າ "ເຂົາເປັນຜູ້ປະເສີດຍ້ອນຄວາມເປັນຜູ້ມີວັນນະສູງ"

ບຸກຄົນລາງຄົນໃນໂລກນີ້ ແມ່ນມີວັນນະສູງກໍເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງ ຢາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຍ້ອນແນວນັ້ນ ເຮົາຈຶ່ງບໍ່ກ່າວວ່າ "ເຂົາເປັນຜູ້ຊົ່ວຊາມຍ້ອນຄວາມເປັນຜູ້ມີວັນນະສູງ"

ບຸກຄົນລາງຄົນໃນໂລກນີ້ ແມ່ນມີຊັບສົມບັດຫຼາຍກໍຍັງເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດພະຍາບາດ ເປັນມິດສາທິດຖິ ຍ້ອນແນວນັ້ນ ເຮົາຈຶ່ງບໍ່ກ່າວວ່າ "ເຂົາເປັນຜູ້ປະເສີດຍ້ອນຄວາມເປັນຜູ້ມີຊັບສົມບັດຫຼາຍ"

ບຸກຄົນລາງຄົນໃນໂລກນີ້ ແມ່ນມີຊັບສົມບັດຫຼາຍກໍຍັງເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການ ເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຍ້ອນແນວນັ້ນ ເຮົາຈຶ່ງບໍ່ກ່າວວ່າ "ເຂົາເປັນຜູ້ຊົ່ວຊາມຍ້ອນຄວາມເປັນຜູ້ມີຊັບ ສົມບັດຫຼາຍ"

ພາມ ເຮົາບໍ່ກ່າວວ່າ "ບຸກຄົນຕ້ອງປົນເປີສິ່ງທັງປວງ" ແຕ່ເຮົາກໍບໍ່ປະຕິເສດວ່າ "ບຸກຄົນບໍ່ຕ້ອງປົນເປີສິ່ງທັງປວງ" ຍ້ອນວ່າ ເມື່ອບຸກຄົນປົນເປີສິ່ງໃດຢູ່ ສັດທາ ສີນ ສຸຕະ ຈາຄະ ປັນຍາຍ່ອມຈະເລີນ ຍ້ອນເຫດແຫ່ງການປົນເປີ ເຮົາຈຶ່ງກ່າວວ່າ "ບຸກຄົນຕ້ອງປົນເປີສິ່ງນັ້ນ"

## ຊັບ ໔ ຊະນິດ

[໔໔໐] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ເອສຸກາຣີພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ທ່ານພຣະໂຄດົມ ພາມທັງຫລາຍບັນຍັດຊັບໄວ້ ໔ ຊະນິດ ຄື

໑. ບັນຍັດຊັບຂອງພາມ
໒. ບັນຍັດຊັບຂອງກະສັດ
໓. ບັນຍັດຊັບຂອງແພດ
໔. ບັນຍັດຊັບຂອງສູດ

ໃນຊັບ ໔ ຊະນິດນັ້ນ ພາມທັງຫລາຍບັນຍັດຊັບຂອງພາມ ຄື ການທ່ຽວໄປເພື່ອອາຫານ ແຕ່ພາມເມື່ອດູໝິ່ນຊັບຄືການທ່ຽວໄປເພື່ອອາຫານ ຊື່ວ່າ ເປັນຜູ້ເຮັດໜ້າທີ່ຜິດ ປຽບຄື ຄົນລ້ຽງງົວຖືເອົາຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ ພາມ ທັງຫລາຍບັນຍັດຊັບຂອງພາມໄວ້ເຊັ່ນນີ້ແລ

ພາມທັງຫລາຍບັນຍັດຊັບຂອງກະສັດຄືແລ່ງທະນູ ແຕ່ກະສັດເມື່ອດູໝິ່ນຊັບຄືແລ່ງທະນູ ຊື່ວ່າເປັນຜູ້ເຮັດໜ້າທີ່ຜິດ ປຽບຄືຄົນລ້ຽງງົວຖືເອົາສິ່ງຂອງ ທີ່ເຈົ້າຂອງບໍ່ໄດ້ໃຫ້ ພາມທັງຫລາຍບັນຍັດຊັບຂອງກະສັດໄວ້ເຊັ່ນນີ້ແລ

ພາມທັງຫລາຍ ບັນຍັດຊັບຂອງແພດຄືກະສິກັມ ແລະ ໂຄຣັກຂະກຳ ແຕ່ແພດ ເມື່ອດູໝິ່ນຊັບຄືກະສິກັມ ແລະ ໂຄຣັກຂະກຳ ຊື່ວ່າເປັນຜູ້ເຮັດໜ້າທີ່ຜິດ ປຽບຄື ຄົນລ້ຽງງົວຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ພາມທັງຫລາຍບັນຍັດຊັບຂອງແພດໄວ້ເຊັ່ນນີ້ແລ

ພາມທັງຫລາຍບັນຍັດຊັບຂອງສູດຄືຄຽວ ແລະ ໄມ້ຄານ ແຕ່ສູດເມື່ອດູໝິ່ນ ຊັບຄືຄຽວ ແລະໄມ້ຄານ ຊື່ວ່າ ເປັນຜູ້ເຮັດໜ້າທີ່ຜິດ ປຽບຄື ຄົນລ້ຽງງົວຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ສັນນັ້ນ ພາມທັງຫລາຍບັນຍັດຊັບຂອງສູດໄວ້ເຊັ່ນນີ້ແລ

ທ່ານພຣະໂຄດົມ ພາມທັງຫລາຍຍ່ອມບັນຍັດຊັບໄວ້ ໔ ຊະນິດນີ້ ໃນເລື້ອງນີ້ທ່ານພຣະໂຄດົມຈະຕັດວ່າແນວໃດ"

[໔໔໑] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພາມ ຊາວໂລກທັງປວງເຫັນດ້ວຍກັບຄຳນັ້ນວ່າ "ພາມທັງຫລາຍບັນຍັດຊັບໄວ້ ໔ ຊະນິດທໍ່ນີ້ບໍ?"

ເອສຸກາຣີພາມທູນຕອບວ່າ "ບໍ່ແມ່ນ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ບຸຣຸດຜູ້ຂັດສົນ ບໍ່ມີຊັບສິນອັນໃດເປັນຂອງຕົນ ຍາກຈົນ ຊົນທັງຫລາຍແຂວນກ້ອນຊີ້ນອາບຢາພິດໄວ້ສຳລັບເຂົາເຊິ່ງບໍ່ມັກພໍໃຈ ໂດຍແກ້ງເວົ້າວ່າ "ພໍ່ທ່ານ ເຊີນທ່ານກິນຊີ້ນນີ້ ແຕ່ຕ້ອງຈ່າຍຄ່າຊີ້ນເພີ່ມຂຶ້ນ" ແມ່ນສັນໃດ ພາມທັງຫລາຍບັນຍັດຊັບໄວ້ ໔ ປະເພດ ແກ່ສະມະນະພາມເຫຼົ່ານັ້ນຝ່າຍດຽວ ໂດຍບໍ່ມີຝ່າຍອື່ນຍິນຍອມ ສັນນັ້ນຄືກັນ

ແຕ່ເຮົາບັນຍັດໂລກຸຕຕະຣະທຳອັນເປັນອະຣິຍະວ່າເປັນຊັບຂອງບຸກຄົນ ເມື່ອເຂົາຣະນຶກເຖິງ ວົງຕະກູນເກົ່າອັນເປັນຂອງມານດາບິດາ ອັດພາບເກີດໃນວົງຕະກູນໃດ ໆ ກໍນັບຕາມວົງຕະກູນນັ້ນ ໆ ຖ້າອັດພາບເກີດໃນຕະກູນກະສັດກໍນັບວ່າ "ເປັນກະສັດ" ຖ້າອັດພາບເກີດໃນຕະກູນພາມກໍນັບວ່າ "ເປັນພາມ" ຖ້າອັດພາບເກີດໃນຕະກູນແພດກໍນັບວ່າ "ເປັນແພດ" ຖ້າອັດພາບເກີດໃນຕະກູນສູດກໍນັບວ່າ "ເປັນສູດ" ປຽບຄືໄຟອາໄສ ເຊື້ອໃດ ໆ ຕິດຂຶ້ນກໍນັບຕາມເຊື້ອນັ້ນ ໆ ຖ້າໄຟອາໄສໄມ້ຕິດຂຶ້ນ ກໍນັບວ່າ "ເປັນໄຟໄມ້" ຖ້າອາໄສ ຂີ້ເຫຍື່ອຕິດຂຶ້ນ ກໍນັບວ່າ "ເປັນໄຟຂີ້ເຫຍື່ອ" ຖ້າອາໄສຫຍ້າຕິດຂຶ້ນ ກໍນັບວ່າ "ເປັນໄຟຫຍ້າ" ຖ້າອາໄສມູນງົວຕິດຂຶ້ນກໍນັບວ່າ "ເປັນໄຟມູນງົວ" ແມ່ນສັນໃດ ເຮົາກໍສັນນັ້ນຄືກັນ ບັນຍັດໂລກຸຕຕະຣະທຳອັນເປັນອະຣິຍະວ່າເປັນຊັບຂອງບຸກຄົນ ເມື່ອເຂົາຣະນຶກເຖິງວົງຕະກູນເກົ່າອັນເປັນ ຂອງມານດາບິດາ ອັດພາບເກີດໃນຕະກູນໃດ ໆ ກໍນັບຕາມຕະກູນນັ້ນ ໆ ຖ້າອັດພາບເກີດໃນ ຕະກູນກະສັດ ກໍນັບວ່າ "ເປັນກະສັດ" ຖ້າອັດພາບເກີດໃນຕະກູນພາມ ກໍນັບວ່າ "ເປັນພາມ" ຖ້າອັດພາບເກີດໃນຕະກູນແພດ ກໍນັບວ່າ "ເປັນແພດ" ຖ້າອັດພາບເກີດໃນຕະກູນສູດ ກໍນັບວ່າ "ເປັນສູດ"

## ຄົນຈະດີຫຼືຊົ່ວບໍ່ແມ່ນຍ້ອນຕະກູນ

ພາມ ຖ້າແມ່ນກຸນລະບຸດອອກຈາກຕະກູນກະສັດບວດເປັນບັນພະຊິດ ແລະເຂົາອາໄສທຳວິໄນທີ່ຕະຖາຄົດປະກາດແລ້ວ ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກພຶດຕິກຳອັນເປັນຂ້າເສິກຕໍ່ພົມມະຈັນ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການ ເວົ້າບໍ່ມີສາຣະ ບໍ່ເພ່ງເລັງຍາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຍິນດີກຸສົນທຳອັນເປັນເຄື່ອງນຳອອກຈາກທຸກ

ຖ້າແມ່ນກຸນລະບຸດອອກຈາກຕະກູນ ພາມ ຯລຯ

ຖ້າແມ່ນກຸນລະບຸດອອກຈາກຕະກູນ ແພດ ຯລຯ

ຖ້າແມ່ນກຸນລະບຸດອອກຈາກຕະກູນສູດບວດເປັນບັນພະຊິດ ແລະ ເຂົາອາໄສທຳວິໄນທີ່ຕະຖາຄົດປະກາດແລ້ວ ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກພຶດຕິກຳອັນເປັນຂ້າເສິກຕໍ່ພົມມະຈັນ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຍາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຍິນດີກຸສົນທຳອັນເປັນເຄື່ອງ ນຳອອກຈາກທຸກ

[໔໔໘] ພາມ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໃນປະເທດນີ້ພາມທີ່ນັ້ນຫຼືຍ່ອມ

ສາມາດຈະເລີນເມດຕາຈິດອັນບໍ່ມີເວນ ບໍ່ມີຄວາມບຽດບຽນ ກະສັດ ແພດ ສູດ ບໍ່ສາມາດບໍ?"

ເອສຸກາຣີພາມຂາບທູນວ່າ "ບໍ່ແມ່ນເຊັ່ນນັ້ນ ທ່ານພຣະໂຄດົມ ໃນປະເທດນີ້ແມ່ນກະສັດ ກໍສາມາດຈະເລີນເມດຕາຈິດອັນບໍ່ມີເວນ ບໍ່ມີຄວາມບຽດບຽນໄດ້

ແມ່ນ ພາມ ຯລຯ

ແມ່ນ ແພດ ຯລຯ

ແມ່ນ ສູດ ຯລຯ

ຂ້າແດ່ ທ່ານພຣະໂຄດົມ ຄວາມຈິງ ໃນປະເທດນີ້ ແມ່ນວັນນະ ໔ ທັງໝົດກໍສາມາດ ຈະເລີນເມດຕາຈິດ ອັນບໍ່ມີເວນ ບໍ່ມີຄວາມບຽດບຽນໄດ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ແນວນັ້ນຄືກັນແລ ຖ້າແມ່ນກຸນລະບຸດ ອອກຈາກ ຕະກູນກະສັດບວດເປັນບັນພະຊິດ ແລະ ເຂົາອາໄສທຳວິໄນທີ່ຕະຖາຄົດປະກາດແລ້ວ ເປັນຜູ້ ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກພຶດຕິກຳ ອັນເປັນຂ້າເສິກຕໍ່ ພົມມະຈັນ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າ ຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດບໍ່ພະ ຍາບາດ ເປັນສຳມາທິດຖິ ຍິນດີກຸສົນທຳອັນເປັນເຄື່ອງນຳອອກ ຈາກທຸກ

ຖ້າແມ່ນກຸນລະບຸດອອກຈາກຕະກູນ ພາມ ຯລຯ

ຖ້າແມ່ນກຸນລະບຸດອອກຈາກຕະກູນ ແພດ ຯລຯ

ຖ້າແມ່ນກຸນລະບຸດອອກຈາກຕະກູນສູດບວດເປັນບັນພະຊິດ ແລະ ເຂົາອາໄສທຳວິໄນທີ່ ຕະຖາຄົດປະກາດແລ້ວ ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດ ຈາກພຶດຕິກຳອັນເປັນຂ້າເສິກຕໍ່ພົມມະຈັນ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າ ສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ ສິ່ງຂອງຂອງຜູ້ອື່ນ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຍິນດີກຸສົນທຳອັນເປັນເຄື່ອງນຳອອກ ຈາກທຸກ

[໔໔໓] ພາມ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ພາມທໍ່ນັ້ນຫຼື ຍ່ອມສາມາດຖືເອົາ ເຄື່ອງທຸກໂຕສຳລັບອາບນ້ຳໄປສູ່ແມ່ນ້ຳແລ້ວລອຍລະອອງທຸລີໄດ້ ກະສັດ ແພດ ສູດ ບໍ່ສາມາດ ບໍ?"

ເອສຸກາຣິພາມຂາບທູນວ່າ "ບໍ່ແມ່ນເຊັ່ນນັ້ນ ທ່ານພຣະໂຄດົມ ແມ່ນກະສັດກໍສາມາດ ຖື ເອົາເຄື່ອງທຸກໂຕສຳລັບອາບນ້ຳໄປສູ່ແມ່ນ້ຳແລ້ວລອຍລະອອງທຸລີໄດ້

ແມ່ນ ພາມ ฯລฯ

ແມ່ນ ແພດ ฯລฯ

ແມ່ນ ສູດ ฯລฯ

ຂ້າແດ່ ທ່ານພຣະໂຄດົມ ຄວາມຈິງ ໃນປະເທດນີ້ ແມ່ນວັນນະ ໔ ທັງໝົດກໍສາມາດຖື ເອົາເຄື່ອງທຸກໂຕສຳລັບອາບນ້ຳໄປສູ່ແມ່ນ້ຳແລ້ວລອຍລະອອງທຸລີໄດ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ແນວນັ້ນຄືກັນແລ ຖ້າແມ່ນກຸນລະບຸດ ອອກຈາກ ຕະກູນກະສັດບວດເປັນບັນພະຊິດ ແລະ ເຂົ້າອາໄສທຳວິໄນທີ່ຕະຖາຄົດປະກາດແລ້ວ ເປັນຜູ້ ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກພຶດຕິກຳອັນເປັນ ຂ້າເສິກຕໍ່ ພົມມະຈັນ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າ ຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດບໍ່ພະ ຍາບາດ ເປັນສຳມາທິດຖິ ຍິນດີກຸສົນທຳອັນເປັນເຄື່ອງນຳອອກຈາກທຸກ

ຖ້າແມ່ນກຸນລະບຸດອອກຈາກຕະກູນ ພາມ ฯລฯ

ຖ້າແມ່ນກຸນລະບຸດອອກຈາກຕະກູນ ແພດ ฯລฯ

ຖ້າແມ່ນກຸນລະບຸດອອກຈາກຕະກູນສູດບວດເປັນບັນພະຊິດ ແລະ ເຂົ້າອາໄສທຳວິໄນທີ່ ຕະຖາຄົດປະກາດແລ້ວ ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດ ຈາກພຶດຕິກຳອັນເປັນຂ້າເສິກຕໍ່ພົມມະຈັນ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າ ສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງ ຢາກໄດ້ ສິ່ງຂອງຂອງຜູ້ອື່ນ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຍິນດີກຸສົນທຳອັນເປັນເຄື່ອງ ນຳອອກ ຈາກທຸກ

[໔໔໔] ພາມ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ພຣະຣາຊາມະຫາກະສັດໃນໂລກນີ້ຜູ້ ໄດ້ຮັບມຸດທາພິເສກແລ້ວ ຈະເພິ່ງຊົງເກນບຸຣຸດຜູ້ມີຖານະຕ່າງ ໆ ກັນ ໑໐໐ ຄົນໃຫ້ມາປະຊຸມກັນ ຕັດວ່າ "ມາເທີ້ນທ່ານທັງຫລາຍ ໃນຈຳນວນບຸຣຸດເຫຼົ່ານັ້ນ ບຸຣຸດເຫຼົ່າໃດ ເກີດຈາກຕະກູນກະສັດ ຕະກູນພາມ ຣາດຊະຕະກູນ ບຸຣຸດເຫຼົ່ານັ້ນຈົ່ງຖືເອົາໄມ້ຈັກ ໄມ້ສາລະ ໄມ້ສົນ ໄມ້ຈັນ ຫຼື ໄມ້ ທັບທິມ ມາເຮັດເປັນໄມ້ສີໄຟ ແລ້ວຈົ່ງສີໃຫ້ໄຟລຸກສະຫວ່າງແຈ້ງຂຶ້ນ ມາເທີ້ນທ່ານທັງຫລາຍ

ໃນຈຳນວນບຸຣຸດເຫຼົ່ານັ້ນ ບຸຣຸດເຫຼົ່າໃດ ເກີດຈາກຕະກູນຈັນທານ ຕະກູນພານ ຕະກູນຊ່າງຈັກສານ ຕະກູນຊ່າງລົດ ຕະກູນຄົນຂົນຂີ້ເຫຍື້ອ ບຸຣຸດເຫຼົ່ານັ້ນ ຈຶ່ງຖືເອົາໄມ້ຮາງໝາ ໄມ້ຮາງໝູ ໄມ້ຮາງຍ້ອມຜ້າ ຫຼື ໄມ້ລະຫຸ່ງມາເຮັດເປັນໄມ້ສີໄຟ ແລ້ວຈຶ່ງສີໃຫ້ໄຟລຸກສະຫວ່າງແຈ້ງຂຶ້ນ"

ພາມ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໄຟທີ່ບຸຣຸດທັງຫລາຍຜູ້ເກີດຈາກຕະກູນກະສັດ ຕະກູນພາມ ຣາດຊະຕະກູນ ຖືເອົາໄມ້ຈັກ ໄມ້ສາລະ ໄມ້ສົນ ໄມ້ຈັນ ຫຼື ໄມ້ທັບທິມ ມາເຮັດເປັນໄມ້ສີໄຟ ແລ້ວສີໃຫ້ໄຟລຸກສະຫວ່າງແຈ້ງຂຶ້ນທີ່ນັ້ນ ຫຼື ເປັນໄຟມີນໍ້າ ມີສີ ມີແສງສະຫວ່າງ ແລະ ສາມາດເຮັດກິດທີ່ຕ້ອງເຮັດດ້ວຍໄຟນັ້ນໃຫ້ສຳເລັດໄດ້ ສ່ວນໄຟທີ່ບຸຣຸດທັງຫລາຍ ຜູ້ເກີດຈາກຕະກູນຈັນທານ ຕະກູນນາຍພານ ຕະກູນຊ່າງຈັກສານ ຕະກູນຊ່າງລົດ ຕະກູນຄົນຂົນຂີ້ເຫຍື້ອ ຖືເອົາໄມ້ຮາງໝາ ໄມ້ຮາງໝູ ໄມ້ຮາງຍ້ອມຜ້າ ຫຼື ໄມ້ລະຫຸ່ງມາເຮັດເປັນໄມ້ສີໄຟ ແລ້ວສີໃຫ້ໄຟລຸກສະຫວ່າງແຈ້ງຂຶ້ນນັ້ນ ເປັນໄຟບໍ່ມີນໍ້າ ບໍ່ມີສີ ບໍ່ມີແສງສະຫວ່າງ ແລະບໍ່ສາມາດ ເຮັດກິດທີ່ຕ້ອງເຮັດດ້ວຍໄຟນັ້ນໃຫ້ສຳເລັດໄດ້ແມ່ນບໍ?"

ເອສຸກາຣີພາມຂາບທູນວ່າ "ບໍ່ແມ່ນເຊັ່ນນັ້ນ ທ່ານພຣະໂຄດົມ ແມ່ນໄຟທີ່ບຸຣຸດທັງຫລາຍຜູ້ເກີດຈາກຕະກູນກະສັດ ຕະກູນພາມ ຣາດຊະຕະກູນ ຖືເອົາໄມ້ຈັກ ໄມ້ສາລະ ໄມ້ສົນ ໄມ້ຈັນ ຫຼືໄມ້ທັບທິມ ມາເຮັດເປັນໄມ້ສີໄຟ ແລ້ວສີໃຫ້ໄຟລຸກສະຫວ່າງແຈ້ງຂຶ້ນນັ້ນ ກໍເປັນໄຟມີນໍ້າ ມີສີ ມີແສງສະຫວ່າງ ແລະ ສາມາດເຮັດກິດທີ່ຕ້ອງເຮັດດ້ວຍໄຟນັ້ນໃຫ້ສຳເລັດໄດ້ ແມ່ນໄຟ ທີ່ບຸຣຸດທັງຫລາຍຜູ້ເກີດຈາກຕະກູນຈັນທານ ຕະກູນນາຍພານ ຕະກູນຊ່າງຈັກສານ ຕະກູນຊ່າງລົດ ຕະກູນຄົນຂົນຂີ້ເຫຍື້ອ ຖືເອົາໄມ້ຮາງໝາ ໄມ້ຮາງໝູ ໄມ້ຮາງຍ້ອມຜ້າ ຫຼືໄມ້ລະຫຸ່ງ ມາເຮັດເປັນໄມ້ສີໄຟ ແລ້ວສີໃຫ້ໄຟລຸກສະຫວ່າງແຈ້ງຂຶ້ນນັ້ນ ກໍເປັນໄຟມີນໍ້າ ມີສີ ມີແສງສະຫວ່າງ ແລະສາມາດເຮັດກິດທີ່ຕ້ອງເຮັດດ້ວຍໄຟໃຫ້ສຳເລັດໄດ້

ທ່ານພຣະໂຄດົມ ຄວາມຈິງແມ່ນໄຟທຸກຊະນິດ ກໍເປັນໄຟມີນໍ້າ ມີສີ ມີແສງສະຫວ່າງ ແລະສາມາດເຮັດກິດທີ່ຕ້ອງເຮັດດ້ວຍໄຟໃຫ້ສຳເລັດໄດ້ທັງໝົດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ແນວນັ້ນຄືກັນ ຖ້າແມ່ນບຸກຄົນອອກຈາກຕະກູນກະສັດບວດເປັນບັນພະຊິດ ແລະ ເຂົ້າອາໄສທຳວິໄນທີ່ຕະຖາຄົດປະກາດແລ້ວ ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກພຶດຕິກຳອັນເປັນຂ້າເສິກຕໍ່ພົມມະຈັນ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພັ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຍົນດີກຸສົນທຳອັນເປັນເຄື່ອງນຳອອກຈາກທຸກໄດ້

ຖ້າແມ່ນ ກຸນລະບຸດອອກຈາກຕະກູນ ພາມ ໆລໆ

ຖ້າແມ່ນ ກຸນລະບຸດອອກຈາກຕະກູນ ແພດ ໆລໆ

ຖ້າແມ່ນ ກຸນລະບຸດອອກຈາກຕະກູນສູດບວດເປັນບັນພະຊິດ ແລະ ເຂົາອາໄສທຳວິໄນທີ່ຕະຖາຄົດປະກາດແລ້ວ ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກພຶດຕິກຳອັນເປັນຂ້າເສິກຕໍ່ພົມມະຈັນ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ສິ່ງຂອງຂອງຜູ້ອື່ນ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຍິນດີກຸສົນທຳອັນເປັນເຄື່ອງນຳອອກຈາກທຸກໄດ້"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແບວນີ້ແລ້ວ ເອສຸກາຣີພາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ "ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ໆລໆ ຂໍທ່ານພຣະໂຄດົມໂຜດຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" ດັ່ງນີ້ແລ

**ເອສຸກາຣີສູດທີ່ ໖ ຈົບ**

# ໗. ທະນັນຊານີສູດ

## ວ່າດ້ວຍພາມຊື່ທະນັນຊານີ

[໔໔໕] ຂ້າພະເຈົ້າໄດ້ຟັງມາແບວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕເຂດນະຄອນຣາດຊະຄຶ ສະໄໝນັ້ນແລ ທ່ານພຣະສາຣີບຸດທ່ຽວຈາຣິກໄປໃນທັກຂິນາຄີຣີຊົນນະບົດ ພ້ອມດ້ວຍພິກຂຸໝູ່ໃຫຍ່ ຄັ້ງນັ້ນ ພິກຂຸຮູບໜຶ່ງຈຳພັນສາຢູ່ໃນນະຄອນຣາດຊະຄຶ ໄດ້ເຂົ້າໄປຫາທ່ານພຣະສາຣີບຸດເຖິງທັກຂິນາຄີຣີຊົນນະບົດ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈພໍເປັນທີ່ ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ

ທ່ານພຣະສາຣີບຸດໄດ້ຖາມພິກຂຸນັ້ນວ່າ "ທ່ານຜູ້ມີອາຍຸ ພຣະຜູ້ມີພາກບໍ່ຊົງປະຊວນ ແລະຍັງຊົງມີພຣະກຳລັງຢູ່ບໍ"

ພິກຂຸນັ້ນກ່າວຕອບວ່າ "ທ່ານຜູ້ມີອາຍຸ ພຣະຜູ້ມີພຣະພາກເຈົ້າບໍ່ຊົງປະຊວນ ແລະຍັງຊົງມີພຣະກຳລັງຢູ່ ຂ້ານ້ອຍ"

"ພິກຂຸສົງບໍ່ເຈັບໄຂ້ແລະຍັງມີກຳລັງຢູ່ບໍ?"

"ແມ່ນພິກຂຸສົງກໍບໍ່ເຈັບໄຂ້ແລະຍັງມີກຳລັງຢູ່ ຂ້ານ້ອຍ"

"ພາມຊື່ທະນັນຊານິຢູ່ໃກ້ປະຕູຕັນທຸລະປາລີ ໃນນະຄອນຣາດຊະຄືນັ້ນ ເຂົາບໍ່ເຈັບໄຂ້ແລະຍັງມີກຳລັງຢູ່ບໍ?"

"ແມ້ດນັນຊານິພາມກໍບໍ່ເຈັບໄຂ້ແລະຍັງມີກຳລັງຢູ່ ຂ້ານ້ອຍ"

"ທະນັນຊານິພາມຍັງເປັນຜູ້ບໍ່ຜະໝາດຢູ່ບໍ"

ພິກຂຸນັ້ນຂາບຮຽນວ່າ "ທ່ານຜູ້ມີອາຍຸ ທະນັນຊານິພາມຂອງເຮົາຈະບໍ່ຜະໝາດຢູ່ໄສໄດ້ ເຂົາອາໄສພຣະຣາຊາທ່ຽວບຽດບັງ(ເອົາຜົນປະໂຫຍດຂອງ)ພາມແລະຄະຫະບໍດີ ອາໄສພວກພາມແລະຄະຫະບໍດີບຽດບັງ(ເອົາຜົນປະໂຫຍດ)ຂອງຣັດ ແມ່ນພັນລະຍາຂອງເຂົາ ຜູ້ມີສັດທາ ທີ່ຂໍມາຈາກຕະກູນມີສັດທາ ກໍຕາຍໄປສາແລ້ວ ພັນລະຍາຄົນໃໝ່ຂອງເຂົາ ບໍ່ມີສັດທາ ເຂົາຂໍມາຈາກຕະກູນບໍ່ມີສັດທາ"

ທ່ານພຣະສາຣີບຸດກ່າວວ່າ "ທ່ານຜູ້ມີອາຍຸ ການທີ່ເຮົາໄດ້ຟັງວ່າດນັນຊານິພາມເປັນຜູ້ຜະໝາດ ເປັນຂ່າວບໍ່ດີເລີຍ ຖ້າຈັ່ງໃດ ເຮົາຈະໄດ້ພົບກັບທະນັນຊານິພາມນັ້ນ ຈັກເທື່ອໜຶ່ງ ເຮັດແນວໃດ ເຮົາຈຶ່ງຈະໄດ້ສົນທະນາປາໄສແດ່"

[໔໔໖] ຄັ້ງນັ້ນ ທ່ານພຣະສາຣີບຸດຢູ່ໃນທັກຂິນາຄີຣີຊົນນະບົດຕາມອັດທະຍາໄສແລ້ວ ຈຶ່ງຈາຣິກໄປທາງນະຄອນຣາດຊະຄື ທ່ຽວຈາຣິກໄປຕາມລຳດັບ ຈົນເຖິງນະຄອນຣາດຊະຄືແລ້ວ ໄດ້ຍິນ ວ່າ ສະໄໝນັ້ນທ່ານພຣະສາຣີບຸດຢູ່ທີ່ພຣະເວລຸວັນສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນ ຣາດຊະຄື ເມື່ອໃນເວລາເຊົ້າ ທ່ານພຣະສາຣີບຸດຄອງອັນຕະຣະວາສົກຖືບາດແລະຈີວອນເຂົ້າໄປບິນທະບາດໃນກຣຸງຣາດຊະຄື ສະໄໝນັ້ນ ທະນັນຊານິພາມໃຊ້ຄົນໃຫ້ຣີດນົມງົວເຊິ່ງຢູ່ທີ່ຄອກເຫງົ້າອົກນະຄອນ ທ່ານພຣະສາຣີບຸດທ່ຽວບິນທະບາດໃນນະຄອນຣາດຊະຄື ກັບຈາກບິນທະບາດພາຍຫລັງສັນພັດຕາຫານສຳເລັດແລ້ວ ເຂົ້າໄປຫາດນັນຊານິພາມຮອດບ່ອນຢູ່ ທະນັນຊານິພາມໄດ້ເຫັນທ່ານພຣະສາຣີບຸດກຳລັງຍ່າງມາແຕ່ໄກ ຈຶ່ງເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ແລ້ວກ່າວວ່າ "ນິມົນດື່ມນົມສົດທາງນີ້ເທີ້ນ ພຣະຜູ້ເປັນເຈົ້າສາຣີບຸດ ຍັງພໍມີເວລາສຳລັບສັນພັດຕາຫານ"

ທ່ານພຣະສາຣີບຸດກ່າວວ່າ "ຢ່າເລີຍ ພາມ ມື້ນີ້ອາດຕະມາພາບເຮັດພັຕຕະກິຈ ສຳເລັດແລ້ວ ອາດຕະມາພາບຈັກພັກກາງເວັນທີ່ເຫງົ້າໄມ້ນັ້ນ ທ່ານຄວນຈະມາພົບອາດຕະມາພາບທີ່ເຫງົ້າໄມ້ນັ້ນ"

ທະນັນຊານີພາມຮັບຄຳແລ້ວ ຕໍ່ມາ ທະນັນຊານີພາມບໍຣິໂພກອາຫານເຊົ້າສຳເລັດແລ້ວ ພາຍຫລັງເວລາອາຫານ ໄດ້ເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ

## ການປະພຶດບໍ່ຊອບທຳ

ທ່ານພຣະສາຣີບຸດໄດ້ຖາມທະນັນຊານີພາມວ່າ "ທະນັນຊານີ ທ່ານເປັນຜູ້ບໍ່ຜະໝາດຢູ່ບໍ"

ທະນັນຊານີພາມໄດ້ຕອບວ່າ "ພຣະຜູ້ເປັນເຈົ້າສາຣີບຸດ ຂ້ານ້ອຍຈະບໍ່ຜະໝາດໄດ້ແນວໃດ ຍ້ອນຂ້ານ້ອຍຕ້ອງລ້ຽງມານດາບິດາ ຕ້ອງລ້ຽງບຸດແລະພັນລະຍາ ຕ້ອງລ້ຽງພວກຂ້າທາດກຳມະກອນແລະຄົນຮັບໃຊ້ ຕ້ອງເຮັດກິດທີ່ຄວນເຮັດແກ່ມິດແລະອຳມາດ ຕ້ອງເຮັດກິດທີ່ຄວນ ເຮັດແກ່ຍາດສາໂລຫິດ ຕ້ອງເຮັດກິດທີ່ຄວນເຮັດແກ່ແຂກ ຕ້ອງທຳບຸນທີ່ຄວນແກ່ບຸຣະພະເປຕະຊົນ ຕ້ອງທຳການບວງຊວງທີ່ຄວນເຮັດແກ່ເທວະດາ ຕ້ອງສະໜອງພຣະຣາດຊະວຽກງານຂອງພຣະຣາຊາ ແມ່ນກາຍນີ້ກໍຕ້ອງບຳລຸງຮັກສາ"

[໔໔໗] ທ່ານພຣະສາຣີບຸດຖາມວ່າ "ທະນັນຊານີ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າ ແນວໃດ ບຸກຄົນລາງຄົນໃນໂລກນີ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງມານດາບິດາ ນາຍນິຣະຍະບານເພິ່ງດຶງລາກເຂົາໄປສູ່ນະຮົກ ຍ້ອນເຫດແຫ່ງການປະພຶດອະທຳແລະປະພຶດບໍ່ສະໝ່ຳສະເໝີ ເຂົາຄວນໄດ້ຂໍ້ອ້າງບໍ ວ່າ "ຂ້າພະເຈົ້າເອງປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງມານດາບິດາ ຂໍນາຍນິຣະຍະບານຢ່າ ດຶງລາກຂ້າພະເຈົ້າໄປສູ່ນະຮົກເລີຍ" ຫຼື ມານດາບິດາຂອງຜູ້ນັ້ນຈະເພິ່ງໄດ້ຂໍ້ອ້າງບໍວ່າ "ຄົນນີ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີຍ້ອນເຫດແຫ່ງຂ້າພະເຈົ້າທັງຫລາຍ ຂໍນາຍນິຣະຍະບານຢ່າດຶງລາກເຂົາໄປສູ່ນະຮົກເລີຍ"

ທະນັນຊານີພາມຕອບວ່າ "ພຣະຜູ້ເປັນເຈົ້າສາຣີບຸດ ບໍ່ແມ່ນ ແທ້ທີ່ຈິງຄົນນັ້ນເຖິງຈະໄຫ້ຈົ່ມນັກພຽງໃດກໍຕາມ ນາຍນິຣະຍະບານກໍຕ້ອງໂຍນເຂົາລົງນະຮົກຈົນໄດ້"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນລາງຄົນໃນໂລກນີ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງບຸດແລະພັນລະຍາ ນາຍນິຣະຍະບານຈະເພິ່ງດຶງລາກເຂົາໄປສູ່ນະຮົກ ຍ້ອນເຫດແຫ່ງການປະພຶດອະທຳແລະປະພຶດບໍ່ສະໝ່ຳສະເໝີ ເຂົາຄວນໄດ້ຂໍ້ອ້າງບໍວ່າ "ຂ້າພະເຈົ້າເອງປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງບຸດແລະພັນລະຍາ ຂໍນາຍນິຣະຍະບານຢ່າດຶງລາກຂ້າພະເຈົ້າໄປສູ່ນະຮົກເລີຍ" ຫຼື ບຸດແລະພັນລະຍາຂອງຜູ້ນັ້ນຈະເພິ່ງໄດ້ຂໍ້ອ້າງບໍວ່າ "ຄົນນີ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງຂ້າພະເຈົ້າທັງຫລາຍ ຂໍນາຍນິຣະຍະບານຢ່າດຶງລາກເຂົາໄປສູ່ນະຮົກເລີຍ"

"ບໍ່ແມ່ນ ພຣະຜູ້ເປັນເຈົ້າສາຣີບຸດ ແທ້ທີ່ຈິງຄົນນັ້ນເຖິງຈະໄຫ້ຈົ່ມໜັກພຽງໃດກໍຕາມ ນາຍນິຣະຍະບານ ກໍຕ້ອງໂຍນເຂົາລົງນະຣົກຈົນໄດ້"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນລາງຄົນໃນໂລກນີ້ປະພຶດອະທໍາ ປະພຶດບໍ່ສະໝໍ່າສະເໝີ ຍ້ອນເຫດແຫ່ງຂ້າທາດກໍາມະກອນແລະຄົນຮັບໃຊ້ ນາຍນິຣະຍະບານຈະເພິ່ງດຶງລາກເຂົາໄປສູ່ນະຣົກ ຍ້ອນເຫດແຫ່ງການປະພຶດອະທໍາ ແລະ ປະພຶດບໍ່ສະໝໍ່າສະເໝີ ເຂົາຄວນໄດ້ຂໍ້ອ້າງບໍວ່າ "ຂ້າພະເຈົ້າປະພຶດອະທໍາ ປະພຶດບໍ່ສະໝໍ່າສະເໝີ ຍ້ອນເຫດແຫ່ງ ຂ້າທາດກໍາມະກອນແລະຄົນຮັບໃຊ້ ຂໍນາຍນິຣະຍະບານຢ່າດຶງລາກຂ້າພະເຈົ້າໄປສູ່ນະຣົກເລີຍ" ຫຼື ພວກຂ້າທາດກໍາມະກອນ ແລະ ຄົນຮັບໃຊ້ຂອງຜູ້ນັ້ນຈະເພິ່ງໄດ້ຂໍ້ອ້າງບໍວ່າ "ຄົນນີ້ປະພຶດອະທໍາ ປະພຶດບໍ່ສະໝໍ່າສະເໝີ ຍ້ອນເຫດແຫ່ງຂ້າພະເຈົ້າທັງຫລາຍ ຂໍນາຍນິຣະຍະບານຢ່າດຶງລາກເຂົາໄປສູ່ນະຣົກເລີຍ"

"ບໍ່ແມ່ນ ພຣະຜູ້ເປັນເຈົ້າສາຣີບຸດ ແທ້ທີ່ຈິງຄົນນັ້ນເຖິງຈະໄຫ້ຈົ່ມໜັກພຽງໃດກໍຕາມ ນາຍນິຣະຍະບານກໍຕ້ອງໂຍນເຂົາລົງນະຣົກຈົນໄດ້"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນລາງຄົນໃນໂລກນີ້ປະພຶດອະທໍາ ປະພຶດບໍ່ສະໝໍ່າສະເໝີ ຍ້ອນເຫດແຫ່ງມິດແລະອໍານາດ ນາຍນິຣະຍະບານຈະເພິ່ງດຶງລາກເຂົາໄປສູ່ນະຣົກ ຍ້ອນເຫດແຫ່ງການປະພຶດອະທໍາ ແລະ ປະພຶດບໍ່ສະໝໍ່າສະເໝີ ເຂົາຄວນໄດ້ຂໍ້ອ້າງບໍວ່າ "ຂ້າພະເຈົ້າປະພຶດອະທໍາ ປະພຶດບໍ່ສະໝໍ່າສະເໝີ ຍ້ອນເຫດແຫ່ງມິດອໍານາດ ຂໍນາຍນິຣະຍະບານຢ່າດຶງລາກຂ້າພະເຈົ້າໄປສູ່ນະຣົກເລີຍ" ຫຼື ມິດແລະອໍານາດຂອງຜູ້ນັ້ນຈະເພິ່ງໄດ້ຂໍ້ອ້າງບໍວ່າ "ຄົນນີ້ປະພຶດອະທໍາ ປະພຶດບໍ່ສະໝໍ່າສະເໝີ ຍ້ອນເຫດແຫ່ງຂ້າພະເຈົ້າທັງຫລາຍ ຂໍນາຍນິຣະຍະບານຢ່າດຶງລາກເຂົາໄປສູ່ນະຣົກເລີຍ"

"ບໍ່ແມ່ນ ພຣະຜູ້ເປັນເຈົ້າສາຣີບຸດ ແທ້ທີ່ຈິງຄົນນັ້ນເຖິງຈະໄຫ້ຈົ່ມໜັກພຽງໃດກໍຕາມ ນາຍນິຣະຍະບານກໍຕ້ອງໂຍນເຂົາລົງນະຣົກຈົນໄດ້"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນລາງຄົນໃນໂລກນີ້ປະພຶດອະທໍາ ປະພຶດບໍ່ສະໝໍ່າສະເໝີ ຍ້ອນເຫດແຫ່ງຍາດສາໂລຫິດ ນາຍນິຣະຍະບານຈະເພິ່ງດຶງລາກເຂົາໄປສູ່ນະຣົກ ຍ້ອນເຫດແຫ່ງການປະພຶດອະທໍາແລະປະພຶດບໍ່ສະໝໍ່າສະເໝີ ເຂົາຄວນໄດ້ຂໍ້ອ້າງຫຼື ວ່າ "ຂ້າພະເຈົ້າປະພຶດອະທໍາ ປະພຶດບໍ່ສະໝໍ່າສະເໝີ ຍ້ອນເຫດແຫ່ງຍາດສາໂລຫິດ ຂໍນາຍນິຣະຍະບານຢ່າດຶງລາກຂ້າພະເຈົ້າໄປສູ່ນະຣົກເລີຍ" ຫຼື ຍາດສາໂລຫິດຂອງຜູ້ນັ້ນຈະເພິ່ງໄດ້ຂໍ້ອ້າງບໍວ່າ "ຄົນນີ້ປະພຶດອະທໍາ ປະພຶດບໍ່ສະໝໍ່າສະເໝີ ຍ້ອນເຫດແຫ່ງຂ້າພະເຈົ້າທັງຫລາຍ ຂໍນາຍນິຣະຍະບານຢ່າດຶງລາກເຂົາໄປສູ່ນະຣົກເລີຍ"

"ບໍ່ແມ່ນ ພຣະຜູ້ເປັນເຈົ້າສາຣີບຸດ ແທ້ທີ່ຈິງຄົນນັ້ນເຖິງຈະໄຫ້ຈົ່ມຫລວງຫລາຍ ນາຍນິຣະຍະບານກໍຕ້ອງໂຍນເຂົາລົງນະຮົກຈົນໄດ້"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນລາງຄົນໃນໂລກນີ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງແຂກ ນາຍນິຣະຍະບານຈະເພິ່ງດຶງລາກເຂົາໄປສູ່ນະຮົກ ຍ້ອນເຫດແຫ່ງການປະພຶດອະທຳ ແລະ ປະພຶດບໍ່ສະໝ່ຳສະເໝີ ເຂົາຄວນໄດ້ຂໍ້ອ້າງບໍວ່າ "ຂ້າພະເຈົ້າປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງແຂກ ຂໍນາຍນິຣະຍະບານຢ່າດຶງລາກ ຂ້າພະເຈົ້າໄປສູ່ນະຮົກເລີຍ" ຫຼື ແຂກຂອງຜູ້ນັ້ນຈະເພິ່ງໄດ້ຂໍ້ອ້າງບໍວ່າ "ຄົນນີ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງຂ້າພະເຈົ້າທັງຫລາຍ ຂໍນາຍນິຣະຍະບານຢ່າດຶງລາກເຂົາໄປສູ່ນະຮົກເລີຍ"

"ບໍ່ແມ່ນ ພຣະຜູ້ເປັນເຈົ້າສາຣີບຸດ ແທ້ທີ່ຈິງຄົນນັ້ນເຖິງຈະໄຫ້ຈົ່ມໜັກພຽງໃດກໍຕາມ ນາຍນິຣະຍະບານກໍຕ້ອງໂຍນເຂົາລົງນະຮົກຈົນໄດ້"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນລາງຄົນໃນໂລກນີ້ປະພຶດອະທຳ ປະພຶດ ບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງບຸຣະພະເປຕຊົນ ນາຍນິຣະຍະບານຈະເພິ່ງດຶງລາກເຂົາໄປສູ່ນະຮົກ ຍ້ອນເຫດແຫ່ງການປະພຶດອະທຳແລະປະພຶດບໍ່ສະໝ່ຳສະເໝີ ເຂົາຄວນໄດ້ຂໍ້ອ້າງຫຼື ວ່າ "ຂ້າພະເຈົ້າປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງບຸຣະພະເປຕຊົນ ຂໍນາຍນິຣະຍະບານຢ່າດຶງລາກຂ້າພະເຈົ້າໄປສູ່ນະຮົກເລີຍ" ຫຼືບຸຣະພະເປຕຊົນຂອງຜູ້ນັ້ນຈະເພິ່ງໄດ້ຂໍ້ອ້າງບໍວ່າ "ຄົນນີ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງຂ້າພະເຈົ້າທັງຫລາຍ ຂໍນາຍນິຣະຍະບານຢ່າດຶງລາກເຂົາໄປນະຮົກເລີຍ"

"ບໍ່ແມ່ນ ພຣະຜູ້ເປັນເຈົ້າສາຣີບຸດ ແທ້ທີ່ຈິງຄົນນັ້ນເຖິງຈະໄຫ້ຈົ່ມໜັກພຽງໃດກໍຕາມ ນາຍນິຣະຍະບານ ກໍຕ້ອງໂຍນເຂົາລົງນະຮົກຈົນໄດ້"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນລາງຄົນໃນໂລກນີ້ປະພຶດອະທຳ ປະພຶດ ບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງເທວະດາ ນາຍນິຣະຍະບານຈະເພິ່ງດຶງລາກເຂົາໄປສູ່ນະຮົກ ຍ້ອນເຫດ ແຫ່ງການປະພຶດອະທຳແລະປະພຶດບໍ່ສະໝ່ຳສະເໝີ ເຂົາຄວນໄດ້ຂໍ້ອ້າງບໍວ່າ "ຂ້າພະເຈົ້າ ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງເທວະດາ ຂໍນາຍນິຣະຍະບານຢ່າດຶງລາກຂ້າພະເຈົ້າໄປສູ່ນະຮົກເລີຍ" ຫຼືເທວະດາຂອງຜູ້ນັ້ນຈະເພິ່ງໄດ້ຂໍ້ອ້າງບໍວ່າ "ຄົນນີ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງຂ້າພະເຈົ້າທັງຫລາຍ ຂໍນາຍນິຣະຍະບານຢ່າດຶງລາກເຂົາໄປສູ່ນະຮົກເລີຍ"

"ບໍ່ແມ່ນ ພຣະຜູ້ເປັນເຈົ້າສາຣີບຸດ ແທ້ທີ່ຈິງຄົນນັ້ນເຖິງຈະໄຫ້ຈົ່ມໜັກພຽງໃດກໍຕາມ ນາຍນິຣະຍະບານກໍຕ້ອງໂຍນເຂົາລົງນະຮົກຈົນໄດ້"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນລາງຄົນໃນໂລກນີ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງພຣະຣາຊາ ນາຍນິຣະຍະບານຈະເພິ່ງດຶງລາກເຂົາໄປສູ່ນະຮົກ ຍ້ອນເຫດແຫ່ງການປະພຶດອະທຳ ແລະ ປະພຶດບໍ່ສະໝ່ຳສະເໝີ ເຂົາຄວນໄດ້ຂໍ້ອ້າງ ຫຼື ວ່າ "ຂ້າພະເຈົ້າປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງພຣະຣາຊາ ຂໍນາຍນິຣະຍະບານຢ່າດຶງລາກຂ້າພະເຈົ້າໄປສູ່ນະຮົກເລີຍ" ຫຼື ພຣະຣາຊາຂອງຜູ້ນັ້ນຈະເພິ່ງໄດ້ຂໍ້ອ້າງບໍວ່າ "ຄົນນີ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງຂ້າພະເຈົ້າ ທັງຫລາຍ ຂໍນາຍນິຣະຍະບານຢ່າດຶງລາກເຂົາໄປສູ່ນະຮົກເລີຍ"

"ບໍ່ແມ່ນ ພຣະຜູ້ເປັນເຈົ້າສາຣີບຸດ ແທ້ທີ່ຈິງຄົນນັ້ນເຖິງຈະໄຫ້ຈົ່ມໜັກພຽງໃດກໍຕາມ ນາຍນິຣະຍະບານກໍຕ້ອງໂຍນເຂົາລົງນະຮົກຈົນໄດ້"

ທ່ານພຣະສາຣີບຸດຖາມວ່າ "ທະນັນຊານິທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນລາງຄົນໃນໂລກນີ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງການບຳລຸງປົນເປີກາຍ ນາຍນິຣະຍະບານຈະເພິ່ງດຶງລາກເຂົາໄປສູ່ນະຮົກ ຍ້ອນເຫດແຫ່ງການປະພຶດ ອະທຳແລະປະພຶດບໍ່ສະໝ່ຳສະເໝີ ເຂົາຄວນໄດ້ຂໍ້ອ້າງບໍວ່າ "ຂ້າພະເຈົ້າປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງການບຳລຸງປົນເປີກາຍ ຂໍນາຍນິຣະຍະບານຢ່າດຶງລາກ ຂ້າພະເຈົ້າໄປສູ່ນະຮົກເລີຍ" ຫຼື ຊົນເຫຼົ່າອື່ນຂອງຜູ້ນັ້ນຈະເພິ່ງໄດ້ຂໍ້ອ້າງບໍວ່າ "ຄົນນີ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງການບຳລຸງປົນເປີກາຍ ຂໍນາຍ ນິຣະຍະບານຢ່າດຶງລາກເຂົາໄປສູ່ນະຮົກເລີຍ"

ທະນັນຊານິພາມຕອບວ່າ "ພຣະຜູ້ເປັນເຈົ້າສາຣີບຸດ ບໍ່ແມ່ນ ແທ້ທີ່ຈິງຄົນນັ້ນເຖິງຈະໄຫ້ຈົ່ມຫລວງຫລາຍ ນາຍນິຣະຍະບານກໍຕ້ອງໂຍນເຂົາລົງນະຮົກຈົນໄດ້"

[໔໔໗] ທ່ານພຣະສາຣີບຸດຖາມວ່າ "ທະນັນຊານິ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງມານດາບິດາກັບບຸກຄົນຜູ້ປະພຶດທຳ໑ ປະພຶດສະໝ່ຳສະເໝີ ຍ້ອນເຫດແຫ່ງມານດາບິດາ ບຸກຄົນໃດຈະປະເສີດກວ່າກັນ"

ທະນັນຊານິພາມຕອບວ່າ "ພຣະຜູ້ເປັນເຈົ້າສາຣີບຸດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງມານດາບິດາ ບໍ່ປະເສີດ ສ່ວນບຸກຄົນຜູ້ ປະພຶດທຳ ປະພຶດສະໝ່ຳສະເໝີ ຍ້ອນເຫດແຫ່ງມານດາບິດາ ປະເສີດກວ່າ ແທ້ຈິງ ການປະພຶດທຳແລະການປະພຶດສະໝ່ຳສະເໝີ ປະເສີດກວ່າການປະພຶດ ອະທຳແລະການປະພຶດບໍ່ສະໝ່ຳສະເໝີ"

"ການງານທີ່ມີເຫດປະກອບດ້ວຍທຳ ເຊິ່ງເປັນເຫດໃຫ້ບຸກຄົນສາມາດລ້ຽງມານດາ ບິດາ ບໍ່ເຮັດບາບກຳ ແລະ ປະຕິບັດຕາມຂໍ້ປະຕິບັດທີ່ເປັນບຸນໄດ້ ກໍມີຢູ່

ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງບຸດແລະພັນລະຍາ ກັບບຸກຄົນຜູ້ປະພຶດທຳ ປະພຶດສະໝ່ຳສະເໝີ ຍ້ອນເຫດແຫ່ງບຸດແລະພັນລະຍາ ບຸກຄົນໃດຈະປະເສີດກວ່າກັນ"

"ພຣະຜູ້ເປັນເຈົ້າສາຣີບຸດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງບຸດແລະພັນລະຍາ ບໍ່ປະເສີດ ສ່ວນບຸກຄົນຜູ້ປະພຶດທຳ ປະພຶດສະໝ່ຳສະເໝີ ຍ້ອນເຫດແຫ່ງບຸດແລະພັນລະຍາ ປະເສີດກວ່າ ແທ້ຈິງ ການປະພຶດທຳແລະການປະພຶດສະໝ່ຳສະເໝີ ປະເສີດກວ່າການປະພຶດອະທຳ ແລະການປະພຶດບໍ່ສະໝ່ຳສະເໝີ"

"ການງານທີ່ມີເຫດປະກອບດ້ວຍທຳ ເຊິ່ງເປັນເຫດໃຫ້ບຸກຄົນສາມາດລ້ຽງບຸດ ແລະພັນລະຍາ ບໍ່ເຮັດບາບກຳ ແລະ ປະຕິບັດຕາມຂໍ້ປະຕິບັດທີ່ເປັນບຸນໄດ້ ກໍມີຢູ່

ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງຂ້າທາດກຳມະກອນແລະຄົນຮັບໃຊ້ ກັບບຸກຄົນຜູ້ປະພຶດທຳ ປະພຶດສະໝ່ຳສະເໝີ ຍ້ອນເຫດແຫ່ງຂ້າທາດກຳມະກອນແລະຄົນຮັບໃຊ້ ບຸກຄົນໃດຈະປະເສີດກວ່າກັນ"

"ພຣະຜູ້ເປັນເຈົ້າສາຣີບຸດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງຂ້າທາດກຳມະກອນ ແລະ ຄົນຮັບໃຊ້ ບໍ່ປະເສີດ ສ່ວນບຸກຄົນຜູ້ປະພຶດທຳ ປະພຶດສະໝ່ຳສະເໝີ ຍ້ອນເຫດແຫ່ງຂ້າທາດກຳມະກອນແລະຄົນຮັບໃຊ້ ປະເສີດກວ່າ ແທ້ຈິງ ການປະພຶດທຳແລະການປະພຶດສະໝ່ຳສະເໝີ ປະເສີດກວ່າການປະພຶດອະທຳ ແລະ ການປະພຶດບໍ່ສະໝ່ຳສະເໝີ"

"ການງານທີ່ມີເຫດປະກອບດ້ວຍທຳ ເຊິ່ງເປັນເຫດໃຫ້ບຸກຄົນສາມາດລ້ຽງຂ້າທາດກຳມະກອນ ແລະ ຄົນຮັບໃຊ້ ບໍ່ເຮັດບາບກຳ ແລະ ປະຕິບັດຕາມຂໍ້ປະຕິບັດທີ່ເປັນບຸນໄດ້ ກໍມີຢູ່

ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງມິດແລະອຳມາດ ກັບບຸກຄົນຜູ້ປະພຶດທຳ ປະພຶດສະໝ່ຳສະເໝີ ຍ້ອນເຫດແຫ່ງມິດແລະອຳມາດ ບຸກຄົນໃດຈະປະເສີດກວ່າກັນ"

"ພຣະຜູ້ເປັນເຈົ້າສາຣີບຸດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງມິດແລະອຳມາດ ບໍ່ປະເສີດ ສ່ວນບຸກຄົນຜູ້ປະພຶດທຳ ປະພຶດສະໝ່ຳສະເໝີ ຍ້ອນເຫດແຫ່ງມິດແລະອຳມາດ ປະເສີດກວ່າ ແທ້ຈິງ ການປະພຶດ ທຳແລະການປະພຶດສະໝ່ຳສະເໝີ ປະເສີດກວ່າການປະພຶດອະທຳແລະການປະພຶດ ບໍ່ສະໝ່ຳສະເໝີ"

"ການງານທີ່ມີເຫດປະກອບດ້ວຍທຳ ເຊິ່ງເປັນເຫດໃຫ້ບຸກຄົນສາມາດເຮັດວຽກງານແກ່

ມິດແລະອຳນາດ ບໍ່ເຮັດບາບກຳ ແລະປະຕິບັດຕາມຂໍ້ປະຕິບັດທີ່ເປັນບຸນໄດ້ ກໍມີຢູ່

ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງຍາດສາໂລຫິດ ກັບບຸກຄົນຜູ້ປະພຶດທຳ ປະພຶດສະໝ່ຳສະເໝີ ຍ້ອນເຫດແຫ່ງຍາດສາໂລຫິດ ບຸກຄົນໃດຈະປະເສີດກວ່າກັນ"

"ພຣະຜູ້ເປັນເຈົ້າສາຣີບຸດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງຍາດສາໂລຫິດ ບໍ່ປະເສີດ ສ່ວນບຸກຄົນຜູ້ປະພຶດທຳ ປະພຶດສະໝ່ຳສະເໝີ ຍ້ອນເຫດແຫ່ງຍາດສາໂລຫິດປະເສີດກວ່າ ແທ້ຈິງ ການປະພຶດທຳແລະການປະພຶດ ສະໝ່ຳສະເໝີ ປະເສີດກວ່າການປະພຶດອະທຳ ແລະການປະພຶດບໍ່ສະໝ່ຳສະເໝີ"

"ການງານທີ່ມີເຫດປະກອບດ້ວຍທຳ ເຊິ່ງເປັນເຫດໃຫ້ບຸກຄົນສາມາດເຮັດວຽກງານແກ່ຍາດສາໂລຫິດ ບໍ່ເຮັດບາບກຳ ແລະປະຕິບັດຕາມຂໍ້ປະຕິບັດທີ່ເປັນບຸນໄດ້ ກໍມີຢູ່

ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງແຂກ ກັບບຸກຄົນຜູ້ປະພຶດທຳ ປະພຶດສະໝ່ຳສະເໝີ ຍ້ອນເຫດ ແຫ່ງແຂກ ບຸກຄົນໃດຈະປະເສີດກວ່າກັນ"

"ພຣະຜູ້ເປັນເຈົ້າສາຣີບຸດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງແຂກບໍ່ປະເສີດ ສ່ວນບຸກຄົນຜູ້ປະພຶດທຳ ປະພຶດສະໝ່ຳສະເໝີຍ້ອນເຫດແຫ່ງແຂກ ປະເສີດກວ່າ ແທ້ຈິງ ການປະພຶດທຳແລະການປະພຶດສະໝ່ຳສະເໝີ ປະເສີດກວ່າການປະພຶດອະທຳແລະການປະພຶດບໍ່ສະໝ່ຳສະເໝີ"

"ການງານທີ່ມີເຫດປະກອບດ້ວຍທຳ ເຊິ່ງເປັນເຫດໃຫ້ບຸກຄົນສາມາດເຮັດວຽກງານແກ່ແຂກ ບໍ່ເຮັດບາບກຳ ແລະປະຕິບັດຕາມຂໍ້ປະຕິບັດທີ່ເປັນບຸນໄດ້ ກໍມີຢູ່

ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງບຸຣະພະເປຕຊົນ ກັບບຸກຄົນຜູ້ປະພຶດທຳ ປະພຶດສະໝ່ຳສະເໝີ ຍ້ອນເຫດແຫ່ງບຸຣະພະເປຕຊົນ ບຸກຄົນໃດຈະປະເສີດກວ່າກັນ"

"ພຣະຜູ້ເປັນເຈົ້າສາຣີບຸດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງບຸຣະພະເປຕຊົນ ບໍ່ປະເສີດ ສ່ວນບຸກຄົນຜູ້ປະພຶດທຳ ປະພຶດສະໝ່ຳສະເໝີຍ້ອນເຫດແຫ່ງບຸຣະພະເປຕຊົນປະເສີດກວ່າ ແທ້ຈິງ ການປະພຶດທຳແລະການປະພຶດສະໝ່ຳສະເໝີ ປະເສີດກວ່າການປະພຶດອະທຳ ແລະການປະພຶດບໍ່ສະໝ່ຳສະເໝີ"

"ການງານທີ່ມີເຫດປະກອບດ້ວຍທຳ ເຊິ່ງເປັນເຫດໃຫ້ບຸກຄົນສາມາດເຮັດວຽກງານແກ່ບຸຣະພະເປຕຊົນ ບໍ່ເຮັດບາບກຳ ແລະປະຕິບັດຕາມຂໍ້ປະຕິບັດທີ່ເປັນບຸນໄດ້ ກໍມີຢູ່

ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງເທວະດາ ກັບບຸກຄົນຜູ້ປະພຶດທຳ ປະພຶດສະໝ່ຳສະເໝີ ຍ້ອນເຫດແຫ່ງເທວະດາ ບຸກຄົນໃດຈະປະເສີດກວ່າກັນ"

"ພຣະຜູ້ເປັນເຈົ້າສາຣີບຸດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງເທວະດາບໍ່ປະເສີດ ສ່ວນບຸກຄົນຜູ້ປະພຶດທຳ ປະພຶດສະໝ່ຳສະເໝີ ຍ້ອນເຫດແຫ່ງເທວະດາປະເສີດກວ່າ ແທ້ຈິງ ການປະພຶດທຳແລະການປະພຶດສະໝ່ຳສະເໝີ ປະເສີດກວ່າການປະພຶດອະທຳ ແລະການປະພຶດບໍ່ສະໝ່ຳສະເໝີ"

"ການງານທີ່ມີເຫດປະກອບດ້ວຍທຳ ເຊິ່ງເປັນເຫດໃຫ້ບຸກຄົນສາມາດເຮັດວຽກງານແກ່ເທວະດາ ບໍ່ເຮັດບາບກຳ ແລະປະຕິບັດຕາມຂໍ້ປະຕິບັດທີ່ເປັນບຸນໄດ້ ກໍມີຢູ່

ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງພຣະຣາຊາ ກັບບຸກຄົນຜູ້ປະພຶດທຳ ປະພຶດສະໝ່ຳສະເໝີ ຍ້ອນເຫດແຫ່ງພຣະຣາຊາ ບຸກຄົນໃດຈະປະເສີດກວ່າກັນ"

"ພຣະຜູ້ເປັນເຈົ້າສາຣີບຸດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງພຣະຣາຊາບໍ່ປະເສີດ ສ່ວນບຸກຄົນຜູ້ປະພຶດທຳ ປະພຶດສະໝ່ຳສະເໝີ ຍ້ອນເຫດແຫ່ງພຣະຣາຊາປະເສີດກວ່າ ແທ້ຈິງ ການປະພຶດທຳແລະການປະພຶດສະໝ່ຳສະເໝີ ປະເສີດກວ່າການປະພຶດອະທຳແລະການປະພຶດບໍ່ສະໝ່ຳສະເໝີ"

"ການງານທີ່ມີເຫດປະກອບດ້ວຍທຳ ເຊິ່ງເປັນເຫດໃຫ້ບຸກຄົນສາມາດເຮັດວຽກງານແກ່ພຣະຣາຊາ ບໍ່ເຮັດບາບກຳ ແລະປະຕິບັດຕາມຂໍ້ປະຕິບັດທີ່ເປັນບຸນໄດ້ ກໍມີຢູ່

ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງການບຳລຸງປິ່ນເປີກາຍ ກັບບຸກຄົນຜູ້ປະພຶດທຳ ປະພຶດສະໝ່ຳສະເໝີ ຍ້ອນເຫດແຫ່ງການບຳລຸງປິ່ນເປີກາຍ ບຸກຄົນໃດຈະປະເສີດກວ່າກັນ"

ທະນັນຊານິພານຕອບວ່າ "ພຣະຜູ້ເປັນເຈົ້າສາຣີບຸດ ບຸກຄົນຜູ້ປະພຶດອະທຳ ປະພຶດບໍ່ສະໝ່ຳສະເໝີ ຍ້ອນເຫດແຫ່ງການບຳລຸງປິ່ນເປີກາຍ ບໍ່ປະເສີດ ສ່ວນບຸກຄົນ ຜູ້ປະພຶດທຳ ປະພຶດສະໝ່ຳສະເໝີ ຍ້ອນເຫດແຫ່ງການບຳລຸງປິ່ນເປີກາຍ ປະເສີດກວ່າ ແທ້ຈິງ ການປະພຶດທຳແລະການປະພຶດສະໝ່ຳສະເໝີ ປະເສີດກວ່າການປະພຶດອະທຳ ແລະການປະພຶດບໍ່ສະໝ່ຳສະເໝີ"

ທ່ານພຣະສາຣີບຸດກ່າວວ່າ "ທະນັນຊານີ ການງານທີ່ມີເຫດປະກອບດ້ວຍທຳ ເຊິ່ງເປັນເຫດໃຫ້ບຸກຄົນສາມາດບຳລຸງປິ່ນເປີກາຍ ບໍ່ເຮັດບາບກຳ ແລະປະຕິບັດຕາມຂໍ້ປະຕິບັດທີ່ເປັນບຸນໄດ້ ກໍມີຢູ່"

## ທະນັນຊານີພາມປ່ວຍໜັກ

[໔໔໙] ຄັ້ງນັ້ນ ທະນັນຊານີພາມຊົມຊື່ນຍິນດີພາສິດຂອງທ່ານພຣະສາຣີບຸດ ລຸກຈາກບ່ອນນັ່ງແລ້ວຈາກໄປ ສະໄໝຕໍ່ມາ ທະນັນຊານີພາມປ່ວຍ ມີທຸກ ເປັນໄຂ້ໜັກ ຈຶ່ງຮຽກບຸຣຸດຄົນໜຶ່ງມາກ່າວວ່າ

"ມານີ້ເທີ້ນພໍ່ທ່ານ ທ່ານຈົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຈົ່ງຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມຕາມຄຳຂອງເຮົາວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ທະນັນຊານີພາມປ່ວຍ ມີທຸກ ເປັນໄຂ້ໜັກ ຂໍຖວາຍອະພິວາດ ພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ" ແລະຈົ່ງເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ແລ້ວໄຫວ້ຕີນຂອງພຣະຜູ້ເປັນເຈົ້າພຣະສາຣີບຸດດ້ວຍຂະໜ່ອມຕາມຄຳຂອງເຮົາວ່າ "ພຣະຜູ້ເປັນເຈົ້າຜູ້ຈະເລີນ ທະນັນຊານີພາມປ່ວຍ ມີທຸກ ເປັນໄຂ້ໜັກ ຂໍໄຫວ້ຕີນຂອງ ພຣະຜູ້ເປັນເຈົ້າສາຣີບຸດດ້ວຍຂະໜ່ອມ" ແລະຈົ່ງຂາບຮຽນແບບນີ້ວ່າ "ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂໍໂອກາດ ຂໍພຣະຜູ້ເປັນເຈົ້າສາຣີບຸດຈົ່ງອາໄສຄວາມອະນຸເຄາະໂຜດເຂົ້າໄປສູ່ນິເວດຂອງທະນັນຊານີພາມດ້ວຍເທີ້ນ"

ບຸຣຸດນັ້ນຮັບຄຳແລ້ວ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ພຣະອົງຜູ້ຈະເລີນ ທະນັນຊານີພາມປ່ວຍ ມີທຸກ ເປັນໄຂ້ໜັກ ເຂົາຂໍຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ" ແລະໄດ້ເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບຮຽນວ່າ "ພຣະຜູ້ເປັນເຈົ້າຜູ້ຈະເລີນ ທະນັນຊານີພາມປ່ວຍ ມີທຸກ ເປັນໄຂ້ໜັກ ຂໍໄຫວ້ຕີນຂອງພຣະຜູ້ເປັນເຈົ້າສາຣີບຸດດ້ວຍຂະໜ່ອມ ແລະສັ່ງມາແບບນີ້ວ່າ "ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂໍໂອກາດ ຂໍພຣະຜູ້ເປັນເຈົ້າ ພຣະສາຣີບຸດ ຈົ່ງອາໄສຄວາມອະນຸເຄາະໂຜດເຂົ້າໄປສູ່ນິເວດຂອງທະນັນຊານີພາມດ້ວຍເທີ້ນ"

ທ່ານພຣະສາຣີບຸດ ຮັບນິມົນໂດຍອາການດຸດສະນີພາບ

## ພຣະສາຣີບຸດເຂົ້າຢ້ຽມທະນັນຊານີພາມ

[໔໕໐] ລຳດັບນັ້ນ ທ່ານພຣະສາຣີບຸດຄອງອັນຕະຣະວາສົກຖືບາດແລະຈີວອນ ເຂົ້າໄປສູ່

ນິເວດຂອງທະນັນຊານິພາມ ນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ ໄດ້ກ່າວກັບທະນັນຊານິພາມວ່າ "ທະນັນຊານິ ທ່ານຍັງພໍທົນໄດ້ຫຼືບໍ່ (ສະບາຍດີບໍ່) ພໍຍັງອັດພາບໃຫ້ເປັນໄປໄດ້ຫຼືບໍ່? ທຸກຂະເວທະນາລຸດລົງບໍ່ກຳເຣີບຂຶ້ນ ຫຼື ອາການຄາຍລົງ ບໍ່ຮຸນແຮງຂຶ້ນແມ່ນບໍ?"

ທະນັນຊານິພາມຂາບຮຽນວ່າ "ພຣະຜູ້ເປັນເຈົ້າສາຣີບຸດ ຂ້ານ້ອຍເກືອບທົນບໍ່ໄຫວ ຈະຍັງອັດພາບໃຫ້ເປັນໄປບໍ່ໄດ້ແລ້ວ ທຸກຂະເວທະນາຂອງຂ້ານ້ອຍຮຸນແຮງຫຼາຍ ມີແຕ່ກຳເຣີບຂຶ້ນບໍ່ລຸດລົງເລີຍ ອາການມີແຕ່ຍິ່ງຮຸນແຮງຂຶ້ນ ບໍ່ຄາຍລົງເລີຍ ປຽບເໝືອນ ຄົນທີ່ແຂງແຮງໃຊ້ເຫລັກທີ່ແຫລມຄົມແທງໃສ່ຫົວ ແມ່ນສັນໃດ ຂ້ານ້ອຍກໍສັນນັ້ນຄືກັນ ຖືກລົມທີ່ແຮງກ້າສຽດແທງຫົວຂ້ານ້ອຍເກືອບທົນບໍ່ໄຫວ ຈະຍັງອັດພາບໃຫ້ເປັນໄປບໍ່ໄດ້ແລ້ວ ທຸກຂະເວທະນາຂອງຂ້ານ້ອຍຮຸນແຮງຫຼາຍ ມີແຕ່ກຳເຣີບຂຶ້ນ ບໍ່ລຸດລົງເລີຍ ອາການມີແຕ່ຍິ່ງຮຸນແຮງຂຶ້ນ ບໍ່ຄາຍລົງເລີຍ

ປຽບເໝືອນ ຄົນທີ່ແຂງແຮງໃຊ້ເຊືອກໜັງທີ່ໜຽວຂັນທີ່ຫົວ ແມ່ນສັນໃດ ຂ້ານ້ອຍກໍສັນນັ້ນຄືກັນ ຖືກເວທະນາທີ່ມີປະມານຍິ່ງບີບຄັ້ນທີ່ຫົວ ຂ້ານ້ອຍແທບທົນບໍ່ໄຫວ ຈະຍັງອັດພາບໃຫ້ເປັນໄປບໍ່ໄດ້ແລ້ວ ທຸກຂະເວທະນາຂອງຂ້ານ້ອຍຮຸນແຮງຫຼາຍ ມີແຕ່ກຳເຣີບ ບໍ່ລຸດລົງເລີຍ ອາການມີແຕ່ຍິ່ງ ຮຸນແຮງຂຶ້ນ ບໍ່ຄາຍລົງເລີຍ

ຫຼື ປຽບເໝືອນ ຄົນຂ້າງົວຫຼືລູກມືຂອງຄົນຂ້າງົວຜູ້ຊ່ຽວຊານ ໃຊ້ມີດແລ່ເນື້ອທີ່ຄົມຂີດທ້ອງ ແມ່ນສັນໃດ ຂ້ານ້ອຍກໍສັນນັ້ນຄືກັນ ຖືກລົມທີ່ມີປະມານຍິ່ງສຽດແທງທ້ອງຢູ່ ຂ້ານ້ອຍແທບທົນບໍ່ໄຫວ ຈະຍັງອັດພາບໃຫ້ເປັນໄປບໍ່ໄດ້ແລ້ວ ທຸກຂະເວທະນາຂອງຂ້ານ້ອຍຮຸນແຮງຫຼາຍ ມີແຕ່ກຳເຣີບບໍ່ຄາຍລົງເລີຍ ອາການມີແຕ່ຍິ່ງຮຸນແຮງຂຶ້ນ ບໍ່ຄາຍລົງເລີຍ

ພຣະຜູ້ເປັນເຈົ້າສາຣີບຸດ ຄົນທີ່ແຂງແຮງ ໒ ຄົນຊ່ວຍກັນຈັບຄົນທີ່ອ່ອນແອກວ່າທີ່ແຂນຄົນລະຂ້າງກ້າວໄວ້ທີ່ຂຸມຖ່ານໄຟ ແມ່ນສັນໃດ ຂ້ານ້ອຍກໍສັນນັ້ນຄືກັນ ມີກາຍຖືກຄວາມຮ້ອນຮົນມີປະມານຍິ່ງເຜົາລົນຢູ່ ຂ້ານ້ອຍແທບທົນບໍ່ໄຫວ ຈະຍັງອັດພາບໃຫ້ເປັນໄປບໍ່ໄດ້ແລ້ວ ທຸກຂະເວທະນາຂອງຂ້ານ້ອຍຮຸນແຮງຫຼາຍ ມີແຕ່ກຳເຣີບ ບໍ່ລຸດລົງເລີຍ ອາການມີແຕ່ຍິ່ງຮຸນແຮງຂຶ້ນ ບໍ່ຄາຍລົງເລີຍ"

## ທຸກຄະຕິພູມ ສຸກຄະຕິພູມ

[໔໕໑] ທ່ານພຣະສາຣີບຸດຖາມວ່າ "ທະນັນຊານິ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ນະຣົກກັບກຳເນີດສັດເດຍຣັດສານ ແນວໃດຈະປະເສີດກວ່າກັນ"

ທະນັນຊານິພາມຕອບວ່າ "ພຣະຜູ້ເປັນເຈົ້າສາຣີບຸດ ກຳເນີດສັດເດຍຣັດສານປະເສີດກວ່ານະຣົກ ຂ້ານ້ອຍ"

“ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ກຳເນີດສັດເດຍຣັດສານກັບເຜດວິໄສ ແນວໃດຈະປະເສີດກວ່າກັນ”

“ເຜດວິໄສປະເສີດກວ່າກຳເນີດສັດເດຍຣັດສານ ຂ້ານ້ອຍ”

“ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ເຜດວິໄສກັບມະນຸດ ແນວໃດຈະປະເສີດກວ່າກັນ”

“ມະນຸດປະເສີດກວ່າເຜດວິໄສ ຂ້ານ້ອຍ”

“ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ມະນຸດກັບເທບຊັ້ນຈາຕຸມະຫາຣາດ ແນວໃດຈະປະເສີດກວ່າກັນ”

“ເທບຊັ້ນຈາຕຸມະຫາຣາດປະເສີດກວ່າມະນຸດ ຂ້ານ້ອຍ”

“ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ເທບຊັ້ນຈາຕຸມະຫາຣາດກັບເທບຊັ້ນຕາວະຕິງສາ ແນວໃດຈະປະເສີດກວ່າກັນ”

“ເທບຊັ້ນຕາວະຕິງສາປະເສີດກວ່າກວ່າເທບຊັ້ນຈາຕຸມະຫາຣາດ ຂ້ານ້ອຍ”

“ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ເທບຊັ້ນຕາວະຕິງສາກັບເທບຊັ້ນຍາມາ ແນວໃດຈະປະເສີດກວ່າກັນ”

“ເທບຊັ້ນຍາມາປະເສີດກວ່າເທບຊັ້ນຕາວະຕິງສາ ຂ້ານ້ອຍ”

“ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ເທບຊັ້ນຍາມາກັບເທບຊັ້ນດຸສິດ ແນວໃດຈະປະເສີດກວ່າກັນ”

“ເທບຊັ້ນດຸສິດປະເສີດກວ່າເທບຊັ້ນຍາມາ ຂ້ານ້ອຍ”

“ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ເທບຊັ້ນດຸສິດກັບເທບຊັ້ນນິມມານະຣະດີ ແນວໃດຈະປະເສີດກວ່າກັນ”

“ເທບຊັ້ນນິມມານະຣະດີປະເສີດກວ່າເທບຊັ້ນດຸສິດ ຂ້ານ້ອຍ”

“ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ເທບຊັ້ນນິມມານະຣະດີກັບເທບຊັ້ນປະຣະນິມມິດະວະສະວັຕດີ ແນວໃດຈະປະເສີດກວ່າກັນ”

“ເທບຊັ້ນປະຣະນິມມິດະວະສະວັຕດີປະເສີດກວ່າເທບຊັ້ນນິມມານະຣະດີ ຂ້ານ້ອຍ”

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ເທບຊັ້ນປະຣະນິມມິດະວະສະວັດດີກັບພົມມະໂລກ ແນວໃດຈະປະເສີດກວ່າກັນ"

ທະນັນຊານິພານຕອບວ່າ "ພຣະຜູ້ເປັນເຈົ້າສາຣີບຸດກ່າວວ່າ "ພົມມະໂລກ" ພຣະຜູ້ເປັນເຈົ້າສາຣີບຸດກ່າວວ່າ "ພົມມະໂລກ"

ຄັ້ງນັ້ນ ທ່ານພຣະສາຣີບຸດມີຄວາມຄິດວ່າ "ພາມເຫລົ່ານີ້ ມັກນ້ອມໃຈໄປໃນພົມມະໂລກ ທາງທີ່ດີ ເຮົາຄວນສະແດງທາງເພື່ອເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພົມແກ່ທະນັນຊານິພານ" ຈຶ່ງກ່າວວ່າ "ທະນັນຊານິ ເຮົາຈັກສະແດງທາງເພື່ອເຂົ້າເຖິງຄວາມເປັນ ຜູ້ຢູ່ຮ່ວມກັບພົມ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ທະນັນຊານິພານຮັບຄຳແລ້ວ ທ່ານພຣະສາຣີບຸດໄດ້ກ່າວວ່າ "ທະນັນຊານິ ທາງເພື່ອເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພົມ ເປັນແນວໃດ?

ຄື ພິກຂຸໃນພຣະທຳວິໄນນີ້ ມີເມດຕາຈິດແຜ່ໄປຕະຫຼອດທິດທີ່ ໑ ຢູ່ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກ ໝູ່ເຫຼົ່າ ໃນບ່ອນທຸກສະຖານ ດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ນີ້ເປັນທາງເພື່ອເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພົມ

[໔໕໔] ທະນັນຊານິ ອີກປະການໜຶ່ງ ພິກຂຸມີກະລຸນາຈິດ ຯລຯ

ມີມຸທິຕາຈິດ ຯລຯ

ມີອຸເປກຂາຈິດ ແຜ່ໄປຕະຫຼອດທິດທີ່ ໑ ຢູ່ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດ ເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນບ່ອນທຸກສະຖານ ດ້ວຍອຸເປກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ນີ້ເປັນທາງເພື່ອເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພົມ"

ທະນັນຊານິພານກ່າວວ່າ "ພຣະຜູ້ເປັນເຈົ້າສາຣີບຸດ ຖ້າເຊັ່ນນັ້ນ ຂໍພຣະຄຸນທ່ານຈົ່ງຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ຕາມຄຳຂອງຂ້ານ້ອຍວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທະນັນຊານິພານປ່ວຍ ມີທຸກ ເປັນໄຂ້ໜັກ ເຂົາຂໍຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ"

ຄັ້ງນັ້ນ ທ່ານພຣະສາຣີບຸດເຮັດໃຫ້ທະນັນຊານິພານດຳລົງຢູ່ໃນພົມມະໂລກຊັ້ນຕ່ຳ ໃນເມື່ອມີກິດທີ່ຈະເພິ່ງເຮັດໃຫ້ຍິ່ງຂຶ້ນໄປ ລຸກຈາກອາສະນະແລ້ວຈາກໄປ ລຳດັບນັ້ນ ເມື່ອທ່ານພຣະ

ສາຣີບຸດຈາກໄປບໍ່ດົນ ທະນັນຊານິພານກໍຕາຍໄປບັງເກີດໃນພົມມະໂລກ

[໔໕໓] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫລາຍມາຕັດວ່າ "ພິກຂຸທັງຫລາຍ ສາຣີບຸດນີ້ເຮັດໃຫ້ທະນັນຊານິພານດຳລົງຢູ່ໃນພົມມະໂລກຊັ້ນຕ່ຳ ໃນເມື່ອມີກິດທີ່ຈະເພິ່ງເຮັດໃຫ້ຍິ່ງຂຶ້ນໄປ ລຸກຈາກອາສະນະແລ້ວຈາກໄປ"

ຕໍ່ມາ ທ່ານພຣະສາຣີບຸດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທະນັນຊານິພານປ່ວຍ ມີທຸກ ເປັນໄຂ້ໜັກ ເຂົາຂໍຖວາຍອະພິວາດພຣະບາດທັງສອງ ຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາຣີບຸດ ເປັນຫຍັງ ທ່ານຈຶ່ງເຮັດໃຫ້ທະນັນຊານິພານດຳລົງຢູ່ໃນພົມມະໂລກຊັ້ນຕ່ຳ ໃນເມື່ອມີກິດທີ່ຈະເພິ່ງເຮັດໃຫ້ຍິ່ງຂຶ້ນໄປອີກ ແລ້ວລຸກຈາກອາສະນະຈາກໄປເສຍແນວນັ້ນນໍ"

ທ່ານພຣະສາຣີບຸດຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຄິດແນວນີ້ວ່າ "ພານເຫລົ່ານີ້ ມັກນ້ອມໃຈໄປໃນພົມມະໂລກ ເຮົາຄວນສະແດງທາງເພື່ອເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພົມເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາຣີບຸດ ທະນັນຊານິພານຕາຍໄປບັງເກີດໃນພົມໂລກແລ້ວ" ດັ່ງນີ້ແລ

**ທະນັນຊານິສູດທີ່ ໗ ຈົບ**

# ໘. ວາເສດຖະສູດ

## ວ່າດ້ວຍມານົບຊື່ວາເສດຖະ

[໔໕໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ແຄມປ່າອິດສານັງຄະລະ ໃກ້ໝູ່ບ້ານຊື່ອິດສານັງຄະລະ ສະໄໝນັ້ນ ໃນໝູ່ບ້ານອິດສານັງຄະລະ ມີພານມະນະມະຫາສານຜູ້ມີຊື່ສຽງມາພັກຢູ່ຫຼາຍຄົນ ຄື ຈັງກີພານ ຕາຣຸກຂະພານ ໂປກຂະຣະສາຕິພານ ຊານຸດໂສນິພານ ໂຕ

ເທີຍຍະພາມ ແລະ ຍັງມີພາມມະນະມະຫາສານຜູ້ມີຊື່ສຽງຄົນ ອື່ນ ໆ ອີກ ຄັ້ງນັ້ນ ເມື່ອມານົບຊື່ ວາເສດຖະກັບມານົບຊື່ ພາຣະທະວາຊະ ຍ່າງທ່ຽວຫລິ້ນຢູ່ໄດ້ສົນທະນາກັນຄ້າງໄວ້ ແນວນີ້ວ່າ "ທ່ານຜູ້ຈະເລີນ ດ້ວຍເຫດພຽງທໍ່ໃດບຸກຄົນຈຶ່ງຈະຊື່ວ່າເປັນ ພາມ"

ພາຣະທະວາຊະມານົບກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ບຸກຄົນເປັນຜູ້ມີຊາດກຳເນີດມາດີ ທັງ ໒ ຝ່າຍ ຄື ທັງຝ່າຍມານດາແລະຝ່າຍບິດາ ຖືປະຕິສົນທິບໍລິສຸດດີຕະຫຼອດ ໗ ຊົ່ວ ບັນພະບຸຣຸດ ບໍ່ມີໃຜຈະຄັດຄ້ານຕຳໜິໄດ້ຍ້ອນອ້າງເຖິງຊາດຕະກູນ ດ້ວຍເຫດພຽງທໍ່ນີ້ ບຸກຄົນຈຶ່ງຊື່ວ່າເປັນ ພາມ"

ວາເສດຖະມານົບກ່າວວ່າ "ທ່ານຜູ້ຈະເລີນ ບຸກຄົນເປັນຜູ້ມີສິນແລະເຖິງພ້ອມດ້ວຍຂໍ້ວັດປະຕິບັດ ດ້ວຍເຫດພຽງທໍ່ນີ້ ບຸກຄົນຈຶ່ງຊື່ວ່າເປັນພາມ"

ພາຣະທະວາຊະມານົບບໍ່ອາດໃຫ້ວາເສດຖະມານົບຍິນຍອມໄດ້ ເຖິງວາເສດຖະມານົບກໍບໍ່ອາດໃຫ້ພາຣະທະວາຊະມານົບຍິນຍອມໄດ້ຄືກັນ ລຳດັບນັ້ນ ວາເສດຖະມານົບໄດ້ຮຽກພາຣະທະວາຊະມານົບມາກ່າວ ວ່າ

"ພຣະສະມະນະໂຄດົມຜູ້ເປັນສາກະຍະບຸດນີ້ ສະເດັດອອກບວດຈາກສາກະຍະຕະກູນ ປະທັບຢູ່ທີ່ແຄມປ່າອິດສານັງຄະລະ ໃກ້ໝູ່ບ້ານຊື່ອິດສານັງຄະລະ ທ່ານພຣະໂຄດົມພຣະອົງນັ້ນ ມີກິດຕິສັບອັນງາມຊ່າລືໄປແລ້ວແນວນີ້ວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະ ໃນສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫລາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ມາເທີ້ນທ່ານພາຣະທະວາຊະ ເຮົາທັງຫລາຍຈັກເຂົ້າໄປເຝົ້າພຣະສະມະນະໂຄດົມຮອດບ່ອນຢູ່ແລ້ວທູນຖາມເນື້ອຄວາມນີ້ ພຣະສະມະນະໂຄດົມຈັກຕັດຕອບແກ່ເຮົາທັງຫລາຍແນວໃດ ເຮົາທັງຫລາຍຈັກຊົງຈຳເນື້ອຄວາມນັ້ນ ໄວ້ແນວນັ້ນ"

## ພາຣະທະວາຊະມານົບຮັບຄຳແລ້ວ

[໔໕໕] ລຳດັບນັ້ນ ວາເສດຖະມານົບແລະພາຣະທະວາຊະມານົບໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ວາເສດຖະມານົບໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາວ່າ

"ຂ້າພຣະອົງທັງສອງເປັນຜູ້ຊົງໄຕຣເພດ
ອັນອາຈານອະນຸຍາດແລ້ວ
ແລະປະຕິຍານໄດ້ເອງວ່າ "ເປັນຜູ້ໄດ້ສຶກສາແລ້ວ"

ຂ້າພຣະອົງເປັນສິດທ່ານໂປກຂະຣະສາຕິພາມ
ມານົບຜູ້ນີ້ເປັນສິດທ່ານຕາຣຸກຂະພາມ
ຂ້າພຣະອົງທັງສອງຮູ້ຈົບບົດ
ທີ່ພາມຜູ້ຊົງໄຕຣເພດບອກແລ້ວ
ເປັນຜູ້ມີຂໍ້ພະຍາກອນແມ່ນຍຳຕາມບົດ
ເຊັ່ນດຽວກັນກັບອາຈານໃນການກ່າວມົນ
ຂ້າແດ່ພຣະໂຄດົມ ຂ້າພຣະອົງທັງສອງ
ໂຕ້ຖຽງກັນໃນການກ່າວເຖິງຊາດກຳເນີດ
ຄືພາຣະທະວາຊະມານົບກ່າວວ່າ
"ບຸກຄົນຊື່ວ່າເປັນພາມຍ້ອນຊາດກຳເນີດ"
ສ່ວນຂ້າພຣະອົງກ່າວວ່າ
"ບຸກຄົນຊື່ວ່າເປັນພາມຍ້ອນກຳ"
ພຣະອົງຜູ້ມີພຣະຈັກຂຸຂໍຈົ່ງຊົງຮູ້ແນວນີ້
ຂ້າພຣະອົງທັງສອງນັ້ນ
ບໍ່ອາດຈະໃຫ້ກັນແລະກັນຍິນຍອມໄດ້
ຈຶ່ງໄດ້ມາເຝົ້າເພື່ອທູນຖາມພຣະຜູ້ມີພຣະພາກເຈົ້າ
ຜູ້ເປັນພຣະສຳມາສຳພຸດທະເຈົ້າ
ຜູ້ຜາກົດດ້ວຍອາການແນວນີ້
ຊົນທັງຫລາຍເມື່ອຈະເຂົ້າໄປປະນົມມືຖວາຍບັງຄົມ
ກໍຈັກຖວາຍອະພິວາດພຣະໂຄດົມໄດ້ທົ່ວໂລກ
ຄືດວງຈັນເຕັມດວງສັນນັ້ນ
ຂ້າພຣະອົງຂໍທູນຖາມພຣະໂຄດົມ
ຜູ້ເປັນດວງຈັກຂຸອຸບັດຂຶ້ນໃນໂລກວ່າ
"ບຸກຄົນຊື່ວ່າເປັນພາມຍ້ອນຊາດກຳເນີດ
ຫຼືບຸກຄົນຊື່ວ່າເປັນພາມຍ້ອນກຳ"
ຂໍຈົ່ງຕັດບອກແກ່ຂ້າພຣະອົງທັງສອງຜູ້ບໍ່ຮູ້
ໂດຍປະການທີ່ຈະຮູ້ເຖິງບຸກຄົນຜູ້ເປັນພາມນັ້ນເທີ້ນ"
ພາມໃນພຣະພຸດທະສາດສະໜາ
[໔໕໒] ພຣະຜູ້ມີພຣະພາກເຈົ້າຕັດຕອບດ້ວຍຄາຖາວ່າ
"ວາເສດຖະ ເຮົາຈະພະຍາກອນເຖິງຄວາມພິດສະດານ
ແຫ່ງຊາດກຳເນີດຂອງສັດທັງຫລາຍຕາມລຳດັບຄວາມເໝາະສົມແກ່ທ່ານ

ຍ້ອນວ່າສັດທັງຫລາຍມີຊາດກໍາເນີດແຕກຕ່າງກັນຫຼາຍເຜົ່າພັນ

ທ່ານທັງຫລາຍຮູ້ຈັກຫຍ້າແລະຕົ້ນໄມ້
ແຕ່ຫຍ້າແລະຕົ້ນໄມ້ກໍບໍ່ຍອມຮັບວ່າເປັນຫຍ້າເປັນຕົ້ນໄມ້
ຫຍ້າແລະຕົ້ນໄມ້ເຫຼົ່ານັ້ນຕ່າງມີຮູບຮ່າງສັນຖານສໍາເລັດມາແຕ່ກໍາເນີດ
ຍ້ອນທໍາມະຊາດຂອງພວກມັນຕ່າງກັນ

ຕໍ່ໄປ ທ່ານທັງຫລາຍຈົ່ງຮູ້ຈັກແມງຄີຕັກກະແຕນ
ຕະຫຼອດຈົນເຖິງພວກມົດດໍາ ມົດແດງ
ສັດເຫຼົ່ານັ້ນຕ່າງມີຮູບຮ່າງສັນຖານໄປຕາມກໍາເນີດ
ຍ້ອນກໍາເນີດຂອງພວກມັນຕ່າງກັນ

ທ່ານທັງຫລາຍຈົ່ງຮູ້ຈັກສັດ ໔ ຕີນທັງຂະໜາດນ້ອຍຂະໜາດໃຫຍ່
ສັດເຫຼົ່ານັ້ນຕ່າງມີຮູບຮ່າງສັນຖານໄປຕາມກໍາເນີດ
ຍ້ອນກໍາເນີດຂອງພວກມັນຕ່າງກັນ

ທ່ານທັງຫລາຍຈົ່ງຮູ້ຈັກພວກສັດເລືອຄານ
ທີ່ໃຊ້ທ້ອງແທນຕີນ ມີສັນຫລັງຍາວ
ສັດເຫຼົ່ານັ້ນຕ່າງມີຮູບຮ່າງສັນຖານໄປຕາມກໍາເນີດ
ຍ້ອນກໍາເນີດຂອງພວກມັນຕ່າງກັນ

ຕໍ່ໄປ ທ່ານທັງຫລາຍຈົ່ງຮູ້ຈັກປາ ແລະສັດນໍ້າ
ປະເພດອື່ນທີ່ເກີດທ່ຽວຫາກິນຢູ່ໃນນໍ້າ
ສັດເຫຼົ່ານັ້ນຕ່າງມີຮູບຮ່າງສັນຖານໄປຕາມກໍາເນີດ
ຍ້ອນກໍາເນີດຂອງພວກມັນຕ່າງກັນ

ຕໍ່ໄປ ທ່ານທັງຫລາຍຈົ່ງຮູ້ຈັກສັດປີກທີ່ບິນໄປໃນອາກາດ
ສັດເຫຼົ່ານັ້ນຕ່າງມີຮູບຮ່າງສັນຖານໄປຕາມກໍາເນີດ
ຍ້ອນກໍາເນີດຂອງພວກມັນຕ່າງກັນ

ຮູບຮ່າງສັນຖານຂອງພວກສັດເຫລົ່ານີ້
ຕ່າງກັນຕາມກໍາເນີດຫລວງຫລາຍ ສັນໃດ

ແຕ່ໃນໝູ່ມະນຸດ ບໍ່ມີຮູບຮ່າງສັນຖານແຕກຕ່າງກັນ
ໄປຕາມກໍາເນີດຫລວງຫລາຍ ສັນນັ້ນ
ຄື ຜົມກໍບໍ່ແຕກຕ່າງກັນ
ຫົວ ໃບຫູ ໜ່ວຍຕາ ໃບໜ້າ ດັງ ຮີມຝີປາກ
ຄິ້ວ ຄໍ ບ່າ ທ້ອງ ຫລັງ ສະໂພກ ເອິກ ຊອກອະໄວຍະວະ
ອະໄວຍະວະສືບພັນ ມື ຕີນ ນິ້ວມື ເລັບ ແຂ່ງ ຂາອ່ອນ

ຜິວພັນ ຫຼືສຽງກໍບໍ່ແຕກຕ່າງກັນ
ໃນໝູ່ມະນຸດ ຈຶ່ງບໍ່ມີຮູບຮ່າງສັນຖານຕາມກຳເນີດ
ແຕກຕ່າງກັນຫລວງຫລາຍຄືໃນກຳເນີດອື່ນ ໆ ເລີຍ

[໔໕໑] ໃນໝູ່ມະນຸດ ໃນສະຣີຣະຂອງແຕ່ລະຄົນ
ບໍ່ມີຄວາມແຕກຕ່າງກັນສະເພາະໂຕ
ການຮຽກກັນໃນໝູ່ມະນຸດ ເຂົາຮຽກຕາມບັນຍັດ
ວາເສດຖະ ທ່ານຈົ່ງຮູ້ແນວນີ້ວ່າ
"ໃນໝູ່ມະນຸດ ໃຜກໍຕາມອາໄສໂຄຣັກຂະກຳລ້ຽງຊີບ
ຜູ້ນັ້ນຮຽກວ່າ ຊາວນາ ບໍ່ຮຽກວ່າ ພາມ"

ວາເສດຖະ ທ່ານຈົ່ງຮູ້ແນວນີ້ວ່າ
"ໃນໝູ່ມະນຸດ ໃຜກໍຕາມລ້ຽງຊີບດ້ວຍສິລະປະຫຼາຍແນວ
ຜູ້ນັ້ນຮຽກວ່າ ຊ່າງສິລະປະ ບໍ່ຮຽກວ່າ ພາມ"

ວາເສດຖະ ທ່ານຈົ່ງຮູ້ແນວນີ້ວ່າ
"ໃນໝູ່ມະນຸດ ໃຜກໍຕາມອາໄສການຄ້າຂາຍລ້ຽງຊີບ
ຜູ້ນັ້ນຮຽກວ່າ ພໍ່ຄ້າ ບໍ່ຮຽກວ່າ ພາມ"

ວາເສດຖະ ທ່ານຈົ່ງຮູ້ແນວນີ້ວ່າ
"ໃນໝູ່ມະນຸດ ໃຜກໍຕາມລ້ຽງຊີບດ້ວຍການຮັບໃຊ້ຄົນອື່ນ
ຜູ້ນັ້ນຮຽກວ່າ ຄົນຮັບໃຊ້ ບໍ່ຮຽກວ່າ ພາມ"

ວາເສດຖະ ທ່ານຈົ່ງຮູ້ແນວນີ້ວ່າ
"ໃນໝູ່ມະນຸດ ໃຜກໍຕາມອາໄສຊັບທີ່ລັກເຂົາມາລ້ຽງຊີບ
ຜູ້ນັ້ນຮຽກວ່າ ໂຈນ ບໍ່ຮຽກວ່າ ພາມ"

ວາເສດຖະ ທ່ານຈົ່ງຮູ້ແນວນີ້ວ່າ
"ໃນໝູ່ມະນຸດ ໃຜກໍຕາມອາໄສລູກສອນ ແລະອາວຸດລ້ຽງຊີບ
ຜູ້ນັ້ນຮຽກວ່າ ທະຫານອາຊີບ ບໍ່ຮຽກວ່າ ພາມ"

ວາເສດຖະ ທ່ານຈົ່ງຮູ້ແນວນີ້ວ່າ
"ໃນໝູ່ມະນຸດ ໃຜກໍຕາມລ້ຽງຊີບດ້ວຍການເປັນປະໂລຫິດ
ຜູ້ນັ້ນຮຽກວ່າ ຜູ້ປະກອບພິທີກຳ ບໍ່ຮຽກວ່າ ພາມ"

ວາເສດຖະ ທ່ານຈົ່ງຮູ້ແນວນີ້ວ່າ
"ໃນໝູ່ມະນຸດ ໃຜກໍຕາມປົກຄອງທ້ອງຖິ່ນແລະແວ່ນແຄວ້ນ
ຜູ້ນັ້ນຮຽກວ່າ ພຣະຣາຊາ ບໍ່ຮຽກວ່າ ພາມ"

ເຮົາບໍ່ຮຽກບຸກຄົນຜູ້ຖືກຳເນີດ

ເກີດໃນທ້ອງມານດາວ່າ ເປັນພາມ
ຖ້າເຂົາຍັງເປັນຜູ້ມີກິເລດເຄື່ອງກັງວົນຢູ່
ເຂົາເປັນພຽງຜູ້ຊື່ວ່າໂພວາທີທ່ານັ້ນ
ເຮົາຮຽກຜູ້ໝົດກິເລດເຄື່ອງກັງວົນ
ໝົດຄວາມຍຶດໝັ້ນຖືໝັ້ນນັ້ນວ່າ ເປັນພາມ
[໔໕໗] ເຮົາຮຽກຜູ້ຕັດສັງໂຍດໄດ້ທັງໝົດ
ບໍ່ຫວາດສະດຸ້ງ ພົ້ນຈາກກິເລດເຄື່ອງຂ້ອງ
ປາສະຈາກໂຍຄະວ່າ ເປັນພາມ
ເຮົາຮຽກຜູ້ຕັດຊະເນາະຄືຄວາມໂກດ
ຕັດເຊືອກຄືຕັນຫາ ຕັດທົ່ວເງື່ອນຄືທິດຖິ ໖໒
ພ້ອມທັງສາຍໂຍງຄືອະນຸໄສກິເລດໄດ້
ຖອດຫຼົ້ມໄລຄືອະວິດຊາ
ຕັດສະຣູ້ອະຣິຍະສັດແລ້ວວ່າ ເປັນພາມ
ເຮົາຮຽກຜູ້ບໍ່ປະທຸດສະຮ້າຍ ອົດກັ້ນຕໍ່ຄຳດ່າ
ການທຸບຕີ ແລະການຄຸມຂັງ ມີຂັນຕິທຳເປັນພະລັງ
ມີພະລັງໃຈເຂັ້ມແຂງວ່າ ເປັນພາມ
ເຮົາຮຽກຜູ້ບໍ່ໂກດ ມີຂໍ້ວັດປະຕິບັດເຄັ່ງຄັດ ມີສີນບໍລິສຸດ
ບໍ່ມີຕັນຫາຟູໃຈຂຶ້ນອີກ ເຝິກຕົນໄດ້ແລ້ວ
ມີສະຣີຣະເປັນຊາດສຸດທ້າຍວ່າ ເປັນພາມ
ເຮົາຮຽກຜູ້ບໍ່ຕິດໃຈໃນການທັງຫລາຍ
ຄືຢາດນ້ຳບໍ່ຕິດເທິງໃບບົວ ຄືເມັດພັນຜັກກາດ
ບໍ່ຕິດຢູ່ເທິງປາຍເຫລັກແຫລມນັ້ນວ່າ ເປັນພາມ
ໃນສາດສະໜານີ້ ເຮົາຮຽກຜູ້ທີ່ຮູ້ແຈ້ງ
ເຖິງພາວະສິ້ນກອງທຸກຂອງຕົນ
ປົງຂັນທະພາລະລົງໄດ້ແລ້ວ
ປາສະຈາກກິເລດທັງປວງວ່າ ເປັນພາມ
ເຮົາຮຽກຜູ້ມີປັນຍາເລິກເຊິ່ງ ເປັນນັກປາດ
ສະຫຼາດໃນທາງແລະບໍ່ແມ່ນທາງບັນລຸອະຣະຫັດຕະຜົນ
ທີ່ເປັນປະໂຫຍດສູງສຸດແລ້ວວ່າ ເປັນພາມ
ເຮົາຮຽກບຸກຄົນຜູ້ບໍ່ຄຸກຄີກັບຄະຫຼືຫັດ
ແລະບັນພະຊິດທັງ ໔ ຝ່າຍ ທ່ຽວຈາຣິກໄປ

ຂາດກັງວົນ ມີຄວາມມັກໜ້ອຍວ່າ ເປັນພາມ

ເຮົາຮຽກບຸກຄົນຜູ້ງົດເວັ້ນຈາກການບຽດບຽນ ທຳຮ້າຍສັດທຸກຈຳພວກ ທັງທີ່ສະດຸ້ງ ແລະທີ່ໝັ້ນຄົງ ບໍ່ຂ້າເອງ ບໍ່ໃຊ້ຜູ້ອື່ນໃຫ້ຂ້າວ່າ ເປັນພາມ

ເຮົາຮຽກບຸກຄົນຜູ້ບໍ່ຄິດຮ້າຍ ເມື່ອບຸກຄົນອື່ນຍັງຄິດຮ້າຍ ຜູ້ສະງົບລະງັບເມື່ອບຸກຄົນອື່ນຍັງມີອາດຍາໃນຕົນ ຜູ້ບໍ່ຍຶດໝັ້ນຖືໝັ້ນເມື່ອບຸກຄົນອື່ນ ຍັງມີຄວາມຍຶດໝັ້ນຖືໝັ້ນຢູ່ວ່າ ເປັນພາມ

ເຮົາຮຽກບຸກຄົນຜູ້ເຮັດຣາຄະ ໂທສະ ໂມຫະ ມານະ ແລະມັກຂະ ໃຫ້ຕົກໄປຈາກຈິດໄດ້ ຄືເມັດພັນຜັກກາດຕົກໄປ ຈາກປາຍເຫລັກແຫລມວ່າ ເປັນພາມ

[໔໕໙] ເຮົາຮຽກບຸກຄົນຜູ້ເປັ່ງຄຳເວົ້າບໍ່ຫຍາບ ໃຫ້ຮູ້ຄວາມກັນໄດ້ເປັນຄຳຈິງ ເຊິ່ງບໍ່ເປັນເຫດເຮັດໃຜ ໆ ໃຫ້ຂ້ອງຢູ່ວ່າ ເປັນພາມ

ເຮົາຮຽກບຸກຄົນຜູ້ບໍ່ຖືເອົາສິ່ງຂອງ ທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້ໃນໂລກນີ້ ບໍ່ວ່າຈະຍາວຫຼືສັ້ນ ຈະນ້ອຍຫຼືໃຫຍ່ ຈະສວຍງາມບໍສວຍງາມກໍຕາມວ່າ ເປັນພາມ

ເຮົາຮຽກບຸກຄົນຜູ້ບໍ່ມີຄວາມຫວັງ ຍາກເປັນໂນ່ນເປັນນີ່ ທັງໃນໂລກນີ້ແລະໂລກໜ້າ ໝົດຄວາມທະຍານຢາກໂດຍເດັດຂາດ ມີຈິດລຸດພົ້ນຈາກກິເລດທັງປວງແລ້ວວ່າ ເປັນພາມ

ເຮົາຮຽກບຸກຄົນຜູ້ບໍ່ມີຄວາມອາໄລຄືຕັນຫາ ຮູ້ແຈ້ງຊັດຈົນໝົດຄວາມສົງໄສ ມີຈິດນ້ອມໄປສູ່ອະມົດທຳ ຈົນບັນລຸໄດ້ໃນທີ່ສຸດວ່າ ເປັນພາມ

ເຮົາຮຽກບຸກຄົນຜູ້ລະບຸນແລະບາບທັງ ໔ ໄດ້ ລ່ວງພົ້ນກິເລດເຄື່ອງຂ້ອງແລ້ວ ໝົດຄວາມໂສກເສົ້າ ປາສະຈາກທຸລິຄືກິເລດ ເປັນຜູ້ບໍລິສຸດວ່າ ເປັນພາມ

ເຮົາຮຽກບຸກຄົນຜູ້ໝົດສິ້ນຕັນຫາ

ທີ່ນຳໄປເກີດໃນພົບທັງ ໓ ມີຈິດບໍ່ມົວໝອງ
ຜ່ອງໃສບໍລິສຸດຄືດວງຈັນມື້ເພັນ
ທີ່ປາສະຈາກກ້ອນເຟື້ອໝອກວ່າ ເປັນພາມ

ເຮົາຮຽກບຸກຄົນຜູ້ຂ້າມພົ້ນທາງອ້ອມຄືຣາຄະ
ທາງທີ່ເປັນຫລຸມເປັນນ້ຳສ້າງຄືກິເລດ ສັງສານວັຕຕ໌ ແລະໂມຫະໄດ້ແລ້ວ
ເປັນຜູ້ຂ້າມໂອຄະໄປເຖິງຝັ່ງ ມີຈິດເພ່ງພິນິດຢູ່ສະເໝີ
ບໍ່ຫວັ່ນໄຫວ ໝົດຄວາມສົງໄສວ່າ ເປັນພາມ

ເຮົາຮຽກບຸກຄົນໃນໂລກນີ້ ຜູ້ລະການທັງຫລາຍ
ບວດເປັນບັນພະຊິດ ສິ້ນພະວະຕັນຫາແລ້ວວ່າ ເປັນພາມ

ເຮົາຮຽກບຸກຄົນໃນໂລກນີ້ ຜູ້ລະຕັນຫາໄດ້ແລ້ວ
ບວດເປັນບັນພະຊິດ ສິ້ນການແລະພົບແລ້ວວ່າ ເປັນພາມ

ເຮົາຮຽກບຸກຄົນຜູ້ລະໂຍຄະທີ່ເປັນຂອງມະນຸດແລ້ວ
ລ່ວງພົ້ນໂຍຄະທີ່ເປັນຂອງທິບເສຍໄດ້
ມີຈິດລຸດພົ້ນຈາກໂຍຄະທັງໝົດວ່າ ເປັນພາມ

ເຮົາຮຽກບຸກຄົນຜູ້ລະໄດ້ທັງຄວາມຍິນດີ໑ ແລະຄວາມຍິນຮ້າຍ໔
ເປັນຜູ້ສະງົບເຢືອກເຢັນ ປາສະຈາກອຸປະທິກິເລດ
ຄອບງຳໂລກຄືຂັນທັງໝົດໄດ້ ມີຄວາມເພຍຣວ່າ ເປັນພາມ

ເຮົາຮຽກບຸກຄົນຜູ້ຮູ້ແຈ້ງການຈຸຕິແລະການເກີດ
ຂອງສັດທັງຫລາຍໂດຍອາການທັງປວງ
ເປັນຜູ້ບໍ່ຕິດຂ້ອງດຳເນີນໄປດ້ວຍດີ
ຮູ້ແຈ້ງອະຣິຍະສັດວ່າ ເປັນພາມ

ເຮົາຮຽກບຸກຄົນຜູ້ທີ່ເທວະດາ ຄົນທັນ ແລະມະນຸດ
ຜູ້ບໍ່ສາມາດຢັ່ງຮູ້ເຖິງຄະຕິໄດ້ ສິ້ນອາສະວະແລ້ວ
ເປັນພຣະອະຣະຫັນວ່າ ເປັນພາມ

ເຮົາຮຽກບຸກຄົນຜູ້ບໍ່ມີກິເລດເຄື່ອງກັງວົນ
ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ໝົດຄວາມກັງວົນ
ບໍ່ມີຄວາມຢຶດໝັ້ນຖືໝັ້ນວ່າ ເປັນພາມ

ເຮົາຮຽກບຸກຄົນຜູ້ອົງອາດ ປະເສີດ
ມີຄວາມພຽນ ສະແຫວງຫາຄຸນນະທຳອັນຍິ່ງໃຫຍ່
ຊະນະມານໄດ້ແລ້ວ ບໍ່ມີກິເລດເຄື່ອງເຮັດໃຫ້ຫວັ່ນໄຫວ
ຊຳຣະລ້າງກິເລດໄດ້ແລ້ວ ຮູ້ແຈ້ງອະຣິຍະສັດວ່າ ເປັນພາມ

ເຮົາຮຽກບຸກຄົນຜູ້ຣະນຶກເຖິງອະດີດຊາດໄດ້ ເຫັນສະຫວັນແລະນະຮົກ
ເຖິງຄວາມສິ້ນໄປແຫ່ງຊາດແລ້ວວ່າ ເປັນພາມ

[໔໘໐] ອັນແທ້ຈິງ ນາມແລະໂຄດທີ່ເຂົາກຳນົດໃຫ້ກັນນັ້ນ
ເປັນພຽງສົມມຸດບັນຍັດໃນໂລກ
ນາມແລະໂຄດຜາກົດຢູ່ໄດ້ ຍ້ອນຮູ້ຕາມກັນມາ
ຍາດສາໂລຫິດກຳນົດໄວ້ໃນການເກີດນັ້ນ ໆ

ນາມແລະໂຄດທີ່ກຳນົດຮຽກກັນນີ້
ເປັນຄວາມເຫັນທີ່ຝັງແໜ້ນຢູ່ໃນໃຈມາດົນ
ຂອງພວກຄົນຜູ້ບໍ່ຮູ້ຄວາມຈິງ
ເມື່ອບໍ່ຮູ້ຈຶ່ງກ່າວບຸກຄົນວ່າ ເປັນພາມໂດຍກຳເນີດ

ບຸກຄົນເປັນພາມຍ້ອນຊາດຕະກູນກໍບໍ່ແມ່ນ
ບໍເປັນພາມຍ້ອນຊາດຕະກູນກໍບໍ່ແມ່ນ
ບຸກຄົນເປັນພາມກໍຍ້ອນກຳ
ບໍເປັນພາມກໍຍ້ອນກຳ

ບຸກຄົນເປັນຊາວນາກໍຍ້ອນກຳ
ເປັນຊ່າງສິລະປະກໍຍ້ອນກຳ
ເປັນພໍ່ຄ້າກໍຍ້ອນກຳ
ເປັນຜູ້ຮັບໃຊ້ກໍຍ້ອນກຳ

ບຸກຄົນແມ່ນເປັນໂຈນກໍຍ້ອນກຳ
ເປັນທະຫານອາຊີບກໍຍ້ອນກຳ
ເປັນປະໂລຫິດກໍຍ້ອນກຳ
ແມ່ນເປັນພຣະຣາຊາ ກໍຍ້ອນກຳທັ້ງຫຼາຍ

ບັນດິດທັງຫລາຍຜູ້ມີປົກກະຕິເຫັນປະຕິດຈະສະມຸບບາດ
ມີຄວາມຮູ້ຄວາມເຂົ້າໃຈໃນກຳແລະຜົນຂອງກຳ
ຍ່ອມພິຈາລະນາເຫັນກຳ ຕາມຄວາມເປັນຈິງແນວນີ້
ສັດໂລກຍ່ອມເປັນໄປຕາມກຳ
ໝູ່ສັດເປັນໄປຕາມກຳ
ສັດທັງຫລາຍມີກຳເປັນເຄື່ອງມັດພັນ
ປຽບຄືລົດມີໝຸດເປັນເຄື່ອງຕຶງໄວ້ແລ່ນໄປຢູ່

ບຸກຄົນເປັນພາມໄດ້ ຍ້ອນກຳນີ້
ຄື ຕະບະ ພົມມະຈັນ ສັນຍະມະ ທະມະ໑

ນີ້ ເປັນຄຸນນະທຳສູງສຸດຂອງພາມ
ວາເສດຖະ ທ່ານຈົ່ງຮູ້ແນວນີ້ວ່າ
"ບຸກຄົນຜູ້ເຖິງພ້ອມດ້ວຍວິດຊາ ໓ ສະງົບ ສິ້ນພົບໃໝ່ແລ້ວ
ເປັນທັງພົມ ແລະທ້າວສັກກະຂອງບັນດິດທັງຫລາຍຜູ້ຮູ້ແຈ້ງຢູ່"

[໔໖໑] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ວາເສດຖະມານົບແລະພາຣະທະວາຊະ-ມານົບໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະອົງຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງ ທີ່ຂວ່ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫລົງທາງ ຫຼືເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີ ຕາດີຈັກເຫັນຮູບໄດ້" ຂ້າພຣະອົງທັງສອງນີ້ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງທັງສອງວ່າເປັນອຸປາສົກ ຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ" ດັ່ງນີ້ແລ

**ວາເສດຖະສູດທີ ໙ ຈົບ**

# ໑໐. ສຸພະສູດ

## ວ່າດ້ວຍມານົບຊື່ສຸພະ

[໔໖໒] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນແລ ມານົບຊື່ສຸພະຜູ້ເປັນບຸດຂອງໂຕເທີຍຍະພາມອາໄສຢູ່ໃນນິເວດຂອງຄະຫະບໍດີຜູ້ໜຶ່ງໃນນະຄອນສາວັດຖີ ດ້ວຍວຽກງານບາງຢ່າງ ຄັ້ງນັ້ນສຸພະມານົບ ຜູ້ເປັນບຸດຂອງໂຕເທີຍຍະພາມໄດ້ກ່າວກັບຄະຫະບໍດີ ຜູ້ທີ່ຕົນອາໄສຢູ່ໃນນິເວດວ່າ

"ທ່ານຄະຫະບໍດີ ຂ້າພະເຈົ້າໄດ້ສະດັບມາແລ້ວແນວນີ້ວ່າ "ນະຄອນສາວັດຖີບໍ່ວ່າງຈາກພຣະອະຣະຫັນເລີຍ" ມື້ນີ້ ເຮົາຄວນເຂົ້າໄປນັ່ງໃກ້ສະມະໜະ ຫຼື ພາມຄົນໃດດີນໍ?"

ຄະຫະບໍດີກ່າວວ່າ "ທ່ານຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ທ່ານຈົ່ງເຂົ້າໄປນັ່ງໃກ້ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເທີ້ນ"

ລຳດັບນັ້ນ ສຸພະມານົບຜູ້ເປັນບຸດຂອງໂຕເທີຍຍະພາມຮັບຄຳແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ທ່ານພຣະໂຄດົມ ພາມທັງຫລາຍກ່າວກັນແນວນີ້ວ່າ "ຄະຫຼືຫັດເປັນຜູ້ຍັງ ກຸສົນທຳເຄື່ອງນຳອອກຈາກທຸກໃຫ້ສຳເລັດ ບັນພະຊິດບໍ່ຍັງກຸສົນທຳນັ້ນໃຫ້ສຳເລັດ ໃນເລື້ອງນີ້ ທ່ານພຣະໂຄດົມຈະຕັດວ່າແນວໃດ?"

[໔໗໓] ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມານົບ ໃນເລື້ອງນີ້ເຮົາແຍກກ່າວ ບໍ່ໄດ້ລວມກ່າວ ເຮົາບໍ່ສັນເສີນການປະຕິບັດຜິດຂອງຄະຫຼືຫັດຫຼືບັນພະຊິດ ຈິງຢູ່ ຄະຫຼືຫັດ ຫຼື ບັນພະຊິດຜູ້ປະຕິບັດຜິດ ຊື່ວ່າເປັນຜູ້ບໍ່ຍັງກຸສົນທຳເຄື່ອງນຳອອກຈາກທຸກໃຫ້ສຳເລັດ ຍ້ອນເຫດແຫ່ງອະທິກອນຄືການປະຕິບັດຜິດ

ມານົບ ເຮົາກ່າວສັນເສີນການປະຕິບັດຖືກຕ້ອງຂອງຄະຫຼືຫັດ ຫຼື ບັນພະຊິດ ຈິງຢູ່ຄະຫຼືຫັດ ຫຼື ບັນພະຊິດຜູ້ປະຕິບັດຊອບ ຊື່ວ່າເປັນຜູ້ຍັງກຸສົນທຳເຄື່ອງນຳອອກຈາກທຸກໃຫ້ສຳເລັດ ຍ້ອນເຫດແຫ່ງອະທິກອນຄືການປະຕິບັດຖືກຕ້ອງ"

## ຖານະການງານຂອງຄະຫຼືຫັດແລະບັນພະຊິດ

ສຸພະມານົບທູນຖາມວ່າ "ທ່ານພຣະໂຄດົມ ພາມທັງຫລາຍກ່າວກັນແນວນີ້ວ່າ "ຖານະແຫ່ງການງານຂອງຄະຣາວາດມີຄວາມຕ້ອງການຫຼາຍ ມີກິດຫຼາຍ ມີເລື້ອງຫຼາຍ ມີຄວາມພຽນຫຼາຍ ມີຜົນຫຼາຍ (ສ່ວນ) ຖານະແຫ່ງການງານຝ່າຍບັນພະຊິດມີຄວາມຕ້ອງການໜ້ອຍ ມີກິດໜ້ອຍ ມີເລື້ອງໜ້ອຍ ມີຄວາມພຽນໜ້ອຍ ແລະມີຜົນໜ້ອຍ ໃນເລື້ອງນີ້ ທ່ານພຣະໂຄດົມຈະຕັດວ່າແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ມານົບ ແມ່ນໃນເລື້ອງນີ້ ເຮົາກໍແຍກກ່າວ ບໍ່ໄດ້ລວມກ່າວ ຖານະແຫ່ງການງານທີ່ມີຄວາມຕ້ອງການຫຼາຍ ມີກິດຫຼາຍ ມີເລື້ອງຫຼາຍ ມີຄວາມພຽນຫຼາຍ ເມື່ອວິບັດຍ່ອມມີຜົນໜ້ອຍ ຖານະແຫ່ງການງານທີ່ມີຄວາມຕ້ອງການຫຼາຍ ມີກິດຫຼາຍ ມີເລື້ອງຫຼາຍ ມີຄວາມພຽນຫຼາຍ ເມື່ອເຖິງພ້ອມຍ່ອມມີຜົນຫຼາຍ ຖານະແຫ່ງການງານທີ່ມີຄວາມຕ້ອງການໜ້ອຍ ມີກິດໜ້ອຍ ມີເລື້ອງໜ້ອຍ ມີຄວາມພຽນໜ້ອຍ ເມື່ອວິບັດຍ່ອມມີຜົນໜ້ອຍ ຖານະແຫ່ງການງານທີ່ມີຄວາມຕ້ອງການໜ້ອຍ ມີກິດໜ້ອຍ ມີເລື້ອງໜ້ອຍ ມີຄວາມພຽນໜ້ອຍ ເມື່ອເຖິງພ້ອມຍ່ອມມີຜົນຫຼາຍ

ຖານະແຫ່ງການງານທີ່ມີຄວາມຕ້ອງການຫຼາຍ ມີກິດຫຼາຍ ມີເລື້ອງຫຼາຍ ມີຄວາມພຽນຫຼາຍ ເມື່ອວິບັດຍ່ອມມີຜົນໜ້ອຍ ເປັນແນວໃດ?

ຄື ຖານະແຫ່ງການງານຄືການໄຖ ທີ່ມີຄວາມຕ້ອງການຫຼາຍ ມີກິດຫຼາຍ ມີເລື້ອງຫຼາຍ ມີຄວາມພຽນຫຼາຍ ເມື່ອວິບັດຍ່ອມມີຜົນໜ້ອຍ

ສ່ວນຖານະແຫ່ງການງານທີ່ມີຄວາມຕ້ອງການຫຼາຍ ມີກິດຫຼາຍ ມີເລື້ອງຫຼາຍ ມີຄວາມພຽນຫຼາຍ ເມື່ອເຖິງພ້ອມຍ່ອມມີຜົນຫຼາຍ ເປັນແນວໃດ?

ຄື ຖານະແຫ່ງການງານຄືການໄຖນັ້ນແລ ທີ່ມີຄວາມຕ້ອງການຫຼາຍ ມີກິດຫຼາຍ ມີເລື້ອງຫຼາຍ ມີຄວາມພຽນຫຼາຍ ເມື່ອເຖິງພ້ອມຍ່ອມມີຜົນຫຼາຍ

ຖານະແຫ່ງການງານທີ່ມີຄວາມຕ້ອງການໜ້ອຍ ມີກິດໜ້ອຍ ມີເລື້ອງໜ້ອຍ ມີຄວາມພຽນໜ້ອຍ ເມື່ອວິບັດຍ່ອມມີຜົນໜ້ອຍ ເປັນແນວໃດ?

ຄື ຖານະແຫ່ງການງານຄືການຄ້າຂາຍທີ່ມີຄວາມຕ້ອງການໜ້ອຍ ມີກິດໜ້ອຍ ມີເລື້ອງນ້ອຍ ມີຄວາມພຽນໜ້ອຍ ເມື່ອວິບັດຍ່ອມມີຜົນໜ້ອຍ

ສ່ວນຖານະແຫ່ງການງານທີ່ມີຄວາມຕ້ອງການໜ້ອຍ ມີກິດໜ້ອຍ ມີເລື້ອງໜ້ອຍ ມີຄວາມພຽນໜ້ອຍ ເມື່ອເຖິງພ້ອມຍ່ອມມີຜົນຫຼາຍ ເປັນແນວໃດ?

ຄື ຖານະແຫ່ງການງານຄືການຄ້າຂາຍນັ້ນແລ ທີ່ມີຄວາມຕ້ອງການໜ້ອຍ ມີກິດໜ້ອຍ ມີເລື້ອງໜ້ອຍ ມີຄວາມພຽນໜ້ອຍ ເມື່ອເຖິງພ້ອມຍ່ອມມີຜົນຫຼາຍ

[໔໖໔] ມານົບ ຖານະແຫ່ງການງານຄື ການໄຖ ທີ່ມີຄວາມຕ້ອງການຫຼາຍ ມີກິດຫຼາຍ ມີເລື້ອງຫຼາຍ ມີຄວາມພຽນຫຼາຍ ເມື່ອວິບັດຍ່ອມມີຜົນໜ້ອຍ ແມ່ນສັນໃດ ຖານະແຫ່ງການງານຂອງຄະຣາວາດ ທີ່ມີຄວາມຕ້ອງການຫຼາຍ ມີກິດຫຼາຍ ມີເລື້ອງຫຼາຍ ມີຄວາມພຽນຫຼາຍ ກໍສັນນັ້ນຄືກັນ ເມື່ອວິບັດຍ່ອມມີຜົນໜ້ອຍ

ຖານະແຫ່ງການງານຄືການໄຖນັ້ນແລ ທີ່ມີຄວາມຕ້ອງຫຼາຍ ມີກິດຫຼາຍ ມີເລື້ອງຫຼາຍ ມີຄວາມພຽນຫຼາຍ ເມື່ອເຖິງພ້ອມຍ່ອມມີຜົນຫຼາຍ ແມ່ນສັນໃດ ຖານະແຫ່ງການງານຂອງ ຄະຣາວາດ ທີ່ມີຄວາມຕ້ອງການຫຼາຍ ມີກິດຫຼາຍ ມີເລື້ອງຫຼາຍ ມີຄວາມພຽນຫຼາຍ ກໍສັນນັ້ນຄືກັນ ເມື່ອເຖິງພ້ອມຍ່ອມມີຜົນຫຼາຍ

ຖານະແຫ່ງການງານຄືການຄ້າຂາຍທີ່ມີຄວາມຕ້ອງການໜ້ອຍ ມີກິດໜ້ອຍ ມີເລື້ອງໜ້ອຍ ມີຄວາມພຽນໜ້ອຍ ເມື່ອວິບັດຍ່ອມມີຜົນໜ້ອຍ ແມ່ນສັນໃດ ຖານະແຫ່ງການງານຝ່າຍບັນພະຊິດ ທີ່ມີຄວາມຕ້ອງການໜ້ອຍ ມີກິດໜ້ອຍ ມີເລື້ອງໜ້ອຍ ມີຄວາມພຽນໜ້ອຍ ກໍສັນນັ້ນຄືກັນ ເມື່ອວິບັດຍ່ອມມີຜົນໜ້ອຍ

ຖານະແຫ່ງການງານຄືການຄ້າຂາຍນັ້ນແລ ທີ່ມີຄວາມຕ້ອງການໜ້ອຍ ມີກິດໜ້ອຍ ມີເລື້ອງ ນ້ອຍ ມີຄວາມພຽນໜ້ອຍ ເມື່ອເຖິງພ້ອມຍ່ອມມີຜົນຫຼາຍ ແມ່ນສັນໃດ ຖານະແຫ່ງການງານຝ່າຍບັນພະຊິດທີ່ມີຄວາມຕ້ອງການໜ້ອຍ ມີກິດໜ້ອຍ ມີເລື້ອງໜ້ອຍ ມີຄວາມພຽນໜ້ອຍ ກໍສັນນັ້ນຄືກັນ ເມື່ອເຖິງພ້ອມຍ່ອມມີຜົນຫຼາຍ"

## ບັນຍັດທຳ ໕ ປະການ

ສຸພະມານົບທູນຖາມວ່າ "ທ່ານພຣະໂຄດົມ ພາມທັງຫລາຍບັນຍັດທຳໄວ້ ໕ ປະການ ເພື່ອທຳບຸນ ເພື່ອຍັງກຸສົນທຳໃຫ້ສຳເລັດບໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ມານົບ ພາມທັງຫລາຍບັນຍັດທຳ ໕ ປະການໃດໄວ້ເພື່ອທຳບຸນ ເພື່ອຍັງກຸສົນທຳໃຫ້ສຳເລັດ ຖ້າທ່ານບໍ່ໜັກໃຈ ດີແລ້ວ ທ່ານຈົ່ງ ກ່າວທຳ ໕ ປະການນັ້ນໃນບໍລິສັດນີ້ເທີ້ນ"

ສຸພະມານົບຂາບທູນວ່າ "ທ່ານພຣະໂຄດົມຜູ້ຈະເລີນ ໃນທີ່ທີ່ພຣະອົງຫຼືບຸກຄົນເຊັ່ນກັບພຣະອົງປະທັບນັ່ງຢູ່ ຂ້າພຣະອົງບໍ່ມີຄວາມໜັກໃຈເລີຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມານົບ ຖ້າເຊັ່ນນັ້ນ ທ່ານຈົ່ງກ່າວເທີ້ນ"

ສຸພະມານົບຂາບທູນວ່າ "ທ່ານພຣະໂຄດົມ ພາມທັງຫລາຍບັນຍັດທຳຂໍ້ ທີ່ ໑ ຄື ສັດຈະ ເພື່ອທຳບຸນ ເພື່ອຍັງກຸສົນທຳໃຫ້ສຳເລັດ

ບັນຍັດທຳຂໍ້ທີ່ ໒ ຄື ຕະບະ ຯລຯ
ບັນຍັດທຳຂໍ້ທີ່ ໓ ຄື ພົມມະຈັນ ຯລຯ
ບັນຍັດທຳຂໍ້ທີ່ ໔ ຄື ການຮຽນມົນ ຯລຯ
ບັນຍັດທຳຂໍ້ທີ່ ໕ ຄືການ ບໍລິຈາກ ເພື່ອທຳບຸນ ເພື່ອຍັງກຸສົນທຳໃຫ້ສຳເລັດ

ພາມທັງຫລາຍບັນຍັດທຳ ໕ ປະການນີ້ໄວ້ ເພື່ອທຳບຸນ ເພື່ອຍັງກຸສົນທຳໃຫ້ສຳເລັດ ໃນເລື້ອງນີ້ ທ່ານພຣະໂຄດົມຈະຕັດວ່າແນວໃດ?"

[໔໖໕] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ມານົບ ບັນດາພາມທັງຫລາຍ ແມ່ນພາມຈັກຄົນໜຶ່ງຜູ້ກ່າວແນວນີ້ວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງ ແລ້ວປະກາດຜົນແຫ່ງທຳ ໕ ປະການນີ້" ມີຢູ່ບໍ?"

ສຸພະມານົບທູນຕອບວ່າ "ບໍ່ມີເລີຍ ທ່ານພຣະໂຄດົມ"

"แม่นอาจานท่านໜຶ່ງ ແມ່ນປາຈານຍ໌ຂອງອາຈານທ່ານໜຶ່ງ ຕະຫຼອດຂຶ້ນໄປ ໆ ຊົ່ວອາຈານຂອງພາມທັງຫລາຍ ຜູ້ກ່າວແນວນີ້ວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວປະກາດຜົນແຫ່ງທຳ ໕ ປະການນີ້" ມີຢູ່ບໍ?"

"ບໍ່ມີເລີຍ ທ່ານພຣະໂຄດົມ"

"ແມ່ນລືສີທັງຫລາຍ ຜູ້ເປັນບຸຣະພາຈານຍ໌ຂອງພາມທັງຫລາຍ ຄື ລືສີອັດຖະກະ ລືສີວາມະກະ ລືສີວາມະເທບ ລືສີເວສສາມິດຕະ ລືສີຍະມະຕັກຄີ ລືສີອັງຄີຣະສະ ລືສີພາຣະທະວາຊະ ລືສີວາເສດຖະ ລືສີກັດສະປະ ລືສີພະຄຸ ເຊິ່ງເປັນຜູ້ແຕ່ງມົນ ເປັນຜູ້ບອກມົນທີ່ພວກພາມໃນປັດຈຸບັນນີ້ຂັບຕາມ ບົດມົນເກົ່າທີ່ທ່ານບຸຣະພາຈານພາມຂັບໄວ້ແລ້ວ ບອກໄວ້ແລ້ວ ຮົບໂຮມໄວ້ແລ້ວ ກ່າວໄດ້ຖືກຕ້ອງຕາມທີ່ທ່ານກ່າວໄວ້ ບອກໄດ້ຖືກຕ້ອງຕາມທີ່ທ່ານໄດ້ບອກໄວ້ ແມ່ນທ່ານເຫຼົ່ານັ້ນກໍກ່າວແລ້ວແນວນີ້ວ່າ "ເຮົາທັງຫລາຍເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວປະກາດຜົນແຫ່ງທຳ ໕ ປະການນີ້" ມີຢູ່ບໍ?"

ສຸພະມານົບທູນຕອບວ່າ "ບໍ່ມີເລີຍ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມານົບ ໄດ້ຮູ້ກັນດັ່ງນີ້ວ່າ ບັນດາພາມທັງຫລາຍບໍ່ມີພາມແມ່ນຈັກຄົນໜຶ່ງຜູ້ກ່າວແນວນີ້ວ່າ "ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວ ປະກາດຜົນແຫ່ງທຳ ໕ ປະການນີ້" ບໍ່ມີໃຜຈັກຄົນໜຶ່ງເຊິ່ງເປັນອາຈານ ເປັນ ປາຈານຂອງອາຈາຕະຫຼອດ ໆ ຊົ່ວອາຈານຂອງພາມທັງຫລາຍຜູ້ກ່າວແນວນີ້ວ່າ "ເຮົາໄດ້ເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວປະກາດຜົນແຫ່ງທຳ ໕ ປະການນີ້" ແມ່ນລືສີ ທັງຫລາຍຜູ້ເປັນບຸຣະພາຈານຍ໌ຂອງພາມທັງຫລາຍ ຄື ລືສີອັດຖະກະ ລືສີວາມະກະ ລືສີວາມະເທບ ລືສີເວສສາມິດຕະ ລືສີຍະມະຕັກຄີ ລືສີອັງຄີຣະສະ ລືສີພາຣະທະວາຊະ ລືສີວາເສດຖະ ລືສີກັດສະປະ ລືສີພະຄຸ ເຊິ່ງເປັນຜູ້ແຕ່ງມົນ ເປັນຜູ້ບອກມົນ ທີ່ພາມ ທັງຫລາຍໃນປັດຈຸບັນນີ້ຂັບຕາມບົດມົນເກົ່າ ທີ່ທ່ານຂັບໄວ້ແລ້ວ ບອກໄວ້ແລ້ວ ຮົບໂຮມ ໄວ້ແລ້ວ ກ່າວໄດ້ຖືກຕ້ອງຕາມທີ່ທ່ານໄດ້ກ່າວໄວ້ ບອກໄດ້ຖືກຕ້ອງຕາມທີ່ທ່ານໄດ້ບອກໄວ້ແລ້ວ ແມ່ນທ່ານເຫຼົ່ານັ້ນກໍບໍ່ໄດ້ກ່າວແນວນີ້ວ່າ "ເຮົາທັງຫລາຍເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງແລ້ວປະກາດຜົນແຫ່ງທຳ ໕ ປະການນີ້"

ມານົບ ຄົນຕາບອດເຂົ້າແຖວເກາະຫລັງກັນ ຄົນຢູ່ຫົວແຖວ ຄົນຢູ່ກາງແຖວ ແລະ ຄົນຢູ່ປາຍແຖວ ຕ່າງກໍແນມບໍ່ເຫັນກັນ ແມ່ນສັນໃດ ພາສິດຂອງພາມທັງຫລາຍ ກໍສັນນັ້ນຄືກັນ ເຫັນຈະປຽບໄດ້ກັບຄົນຕາບອດ ເຂົ້າແຖວເກາະຫລັງກັນ ຄົນຢູ່ ຫົວແຖວ ຄົນຢູ່ກາງແຖວ ແລະ ຄົນຢູ່ປາຍແຖວ ຕ່າງກໍແນມບໍ່ເຫັນກັນ"

[໔໖໖] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ສຸພະມານົບຜູ້ເປັນບຸດຂອງໂຕເທີຍຍະພາມຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າຕັດປຽບຄືຄົນຕາບອດຢືນເຂົ້າແຖວ ຈຶ່ງໂກດ ບໍ່ພໍໃຈ ເມື່ອ

ຈະຂົ່ມຂູ່ຕິຕຽນວ່າກ່າວພຣະຜູ້ມີພຣະພາກເຈົ້າວ່າ "ທ່ານພຣະສະມະນະໂຄດົມຈັກໄດ້ຮັບຄວາມເສື່ອມສາແລ້ວ" ຈຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ທ່ານພຣະໂຄດົມ ພາມຊື່ໂປກຂະຣະສາຕິ ໂອປະມັນຍະໂຄດ ຜູ້ເປັນໃຫຍ່ໃນປ່າ ຊື່ສຸພະຄະວັນກ່າວໄວ້ແນວນີ້ວ່າ "ແນວນີ້ແລ ສະມະນະພາມເຫລົ່ານີ້ ຍ່ອມຢັ້ງຢືນ ຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າທຳຂອງມະນຸດ ພາສິດນີ້ຂອງ ສະມະນະພາມເຫຼົ່ານັ້ນ ຍ່ອມເປັນພາສິດທີ່ໜ້າຫົວສຽງ ຊົ່ວຊາມ ວ່າງ ແລະເປົ່າ ຖ້າເຊັ່ນນັ້ນ ກໍເປັນໄປບໍ່ໄດ້ເລີຍທີ່ມະນຸດຈັກຮູ້ ຈັກເຫັນ ຫຼືຈັກເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດ ອັນສາມາດວິເສດຍິ່ງກວ່າທຳຂອງມະນຸດໄດ້"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ມານົບ ພາມຊື່ໂປກຂະຣະສາຕິ ໂອປະມັນຍະໂຄດ ຜູ້ເປັນໃຫຍ່ໃນປ່າຊື່ສຸພະຄະວັນ ກຳນົດຮູ້ໃຈຂອງສະມະນະພາມທຸກຄົນດ້ວຍໃຈບໍ?"

ສຸພະມານົບທູນຕອບວ່າ "ທ່ານພຣະໂຄດົມ ພາມຊື່ໂປກຂະຣະສາຕິ ໂອປະມັນຍະໂຄດ ຜູ້ເປັນໃຫຍ່ໃນປ່າຊື່ສຸພະຄະວັນ ກຳນົດຮູ້ໃຈຂອງນາງທາສີຊື່ປຸນນິກາຂອງຕົນດ້ວຍໃຈຂອງຕົນເອງຍັງບໍ່ໄດ້ ຈັກກຳນົດຮູ້ໃຈຂອງສະມະນະພາມທຸກຄົນດ້ວຍໃຈໄດ້ແນວໃດນໍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ມານົບ ປຽບຄືຄົນຕາບອດມາແຕ່ກຳເນີດ ບໍ່ເພິ່ງເຫັນຮູບສີດຳສີຂາວ ຮູບສີຂຽວ ຮູບສີເຫຼືອງ ຮູບສີແດງ ຮູບສີແສດ ບໍ່ເພິ່ງເຫັນບ່ອນທີ່ຮາບພຽງແລະສູງຕ່ຳ ບໍ່ເພິ່ງເຫັນດວງດາວ ບໍ່ເພິ່ງເຫັນດວງຈັນແລະດວງອາທິດ ເຂົາຈະເພິ່ງກ່າວແນວນີ້ວ່າ "ບໍ່ມີຮູບສີດຳສີຂາວ ບໍ່ມີຄົນເຫັນຮູບສີດຳສີຂາວ ບໍ່ມີຮູບສີຂຽວ ບໍ່ມີຄົນເຫັນຮູບສີຂຽວ ບໍ່ມີຮູບສີເຫຼືອງ ບໍ່ມີຄົນເຫັນຮູບສີເຫຼືອງ ບໍ່ມີຮູບສີແດງ ບໍ່ມີຄົນເຫັນ ຮູບສີແດງ ບໍ່ມີຮູບສີແສດ ບໍ່ມີຄົນເຫັນຮູບສີແສດ ບໍ່ມີບ່ອນທີ່ຮາບພຽງແລະສູງຕ່ຳ ບໍ່ມີຄົນເຫັນ ບ່ອນທີ່ຮາບພຽງແລະສູງຕ່ຳ ບໍ່ມີດວງດາວ ບໍ່ມີຄົນເຫັນດວງດາວ ບໍ່ມີດວງຈັນແລະດວງອາທິດ ບໍ່ມີຄົນເຫັນດວງຈັນແລະດວງອາທິດ ເຮົາບໍ່ຮູ້ບໍ່ເຫັນສິ່ງນັ້ນ ຍ້ອນແນວນັ້ນ ສິ່ງນັ້ນ ຈຶ່ງບໍ່ມີ" ຜູ້ທີ່ກ່າວຢູ່ນັ້ນ ຊື່ວ່າກ່າວຢ່າງຖືກຕ້ອງຫຼືບໍ່? ມານົບ"

ສຸພະມານົບທູນຕອບວ່າ "ບໍ່ແມ່ນເຊັ່ນນັ້ນ ທ່ານພຣະໂຄດົມ ຮູບສີດຳສີຂາວກໍມີ ຄົນເຫັນຮູບສີດຳສີຂາວກໍມີ ຮູບສີຂຽວກໍມີ ຄົນເຫັນຮູບສີຂຽວກໍມີ ຮູບສີເຫຼືອງກໍມີ ຄົນເຫັນຮູບ ສີເຫຼືອງກໍມີ ຮູບສີແດງກໍມີ ຄົນເຫັນຮູບສີແດງກໍມີ ຮູບສີແສດກໍມີ ຄົນເຫັນຮູບສີແສດກໍມີ ບ່ອນທີ່ຮາບພຽງແລະສູງຕ່ຳກໍມີ ຄົນເຫັນບ່ອນທີ່ຮາບພຽງແລະສູງຕ່ຳກໍມີ ດວງດາວກໍມີ ຄົນເຫັນ ດວງດາວກໍມີ ດວງຈັນແລະດວງອາທິດກໍມີ ຄົນເຫັນດວງຈັນແລະດວງອາທິດກໍມີ ຜູ້ທີ່ກ່າວວ່າ "ເຮົາບໍ່ຮູ້ບໍ່ເຫັນສິ່ງນັ້ນ ຍ້ອນແນວນັ້ນ ສິ່ງນັ້ນຈຶ່ງບໍ່ມີ" ຜູ້ທີ່ກ່າວຢູ່ນັ້ນ ຊື່ວ່າກ່າວຢ່າງບໍ່ຖືກຕ້ອງ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມານົບ ແນວນັ້ນຄືກັນ ພາມຊີໂປກຂະຣະສາຕິ ໂອປະມັນຍະໂຄດ ຜູ້ເປັນໃຫຍ່ໃນປ່າຊື່ສຸພະຄະວັນ ຊື່ວ່າເປັນຄົນບອດບໍ່ມີຈັກຂຸ ເປັນໄປບໍ່ໄດ້ເລີຍທີ່ເຂົາຈັກຮູ້ ຈັກເຫັນ ຫຼື ຈັກເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດ ອັນສາມາດວິເສດຍິ່ງກວ່າທຳຂອງມະນຸດໄດ້"

[໔໘໗] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ມານົບ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າ ແນວໃດ ພາມມະນະມະຫາສານຊາວເມືອງໂກສົນຄືພາມຊີຈັງກີ ພາມຊີ ຕາຣຸກຂະ ພາມຊີໂປກຂະຣະສາຕິ ພາມຊີຊານຸດໂສນີ ຫຼືພາມຊີ ໂຕເທຍຍະ ຜູ້ເປັນບິດາຂອງທ່ານ ວາຈາທີ່ພາມມະນະມະຫາສານເຫຼົ່ານັ້ນກ່າວກົງຕາມ ໂວຫານຂອງຊາວໂລກ ບໍກົງຕາມໂວຫານຂອງຊາວໂລກແນວໃດປະເສີດກວ່າກັນ"

ສຸພະມານົບທູນຕອບວ່າ "ຜູ້ກ່າວວາຈາກົງຕາມໂວຫານຂອງຊາວໂລກປະເສີດກວ່າ ທ່ານພຣະໂຄດົມ"

"ວາຈາທີ່ພາມມະນະມະຫາສານເຫຼົ່ານັ້ນ ຮູ້ແລ້ວກ່າວ ບໍຮູ້ແລ້ວກ່າວ ແນວໃດປະເສີດກວ່າກັນ"

"ວາຈາທີ່ພາມເຫຼົ່ານັ້ນຮູ້ແລ້ວກ່າວ ປະເສີດກວ່າ ທ່ານພຣະໂຄດົມ"

"ວາຈາທີ່ພາມມະນະມະຫາສານເຫຼົ່ານັ້ນ ພິຈາລະນາແລ້ວກ່າວ ບໍພິຈາລະນາ ແລ້ວກ່າວ ແນວໃດປະເສີດກວ່າກັນ"

"ວາຈາທີ່ພາມເຫຼົ່ານັ້ນ ພິຈາລະນາແລ້ວກ່າວ ປະເສີດກວ່າ ທ່ານພຣະໂຄດົມ"

"ວາຈາທີ່ມີປະໂຫຍດ ຫຼື ວາຈາ ທີ່ບໍ່ມີປະໂຫຍດເຊິ່ງພາມມະນະມະຫາສານເຫຼົ່ານັ້ນກ່າວ ແນວໃດປະເສີດກວ່າກັນ"

"ວາຈາທີ່ມີປະໂຫຍດ ປະເສີດກວ່າ ທ່ານພຣະໂຄດົມ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຖ້າເມື່ອເປັນເຊັ່ນນັ້ນ ໂປກຂະຣະສາຕິພາມ ໂອປະມັນຍະໂຄດ ຜູ້ເປັນໃຫຍ່ໃນປ່າຊື່ສຸພະຄະວັນ ກ່າວວາຈາກົງຕາມໂວຫານຂອງຊາວໂລກບໍ?"

"ບໍ່ກົງຕາມໂວຫານຂອງຊາວໂລກ ທ່ານພຣະໂຄດົມ"

"ເປັນວາຈາທີ່ຮູ້ແລ້ວກ່າວ ບໍຮູ້ແລ້ວກ່າວ"

"ເປັນວາຈາທີ່ບໍ່ຮູ້ແລ້ວກ່າວ ທ່ານພຣະໂຄດົມ"

"ເປັນວາຈາທີ່ພິຈາລະນາແລ້ວກ່າວບໍພິຈາລະນາແລ້ວກ່າວ"

"ເປັນວາຈາທີ່ບໍ່ພິຈາລະນາແລ້ວກ່າວ ທ່ານພຣະໂຄດົມ"

"ເປັນວາຈາທີ່ມີປະໂຫຍດບໍມີປະໂຫຍດ"

"ເປັນວາຈາທີ່ບໍ່ມີປະໂຫຍດ ທ່ານພຣະໂຄດົມ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມານົບ ນິວອນນີ້ມີ ໕ ປະການ

ນິວອນ ໕ ປະການ ອັນໃດແດ່ ຄື

໑. ການສັນທະນິວອນ (ສິ່ງທີ່ກັ້ນຈິດຄືຄວາມພໍໃຈໃນການ)
໒. ພະຍາບາດນິວອນ (ສິ່ງທີ່ກັ້ນຈິດຄືຄວາມຂັດເຄືອງໃຈ)
໓. ຖີນະມິດທະນິວອນ (ສິ່ງທີ່ກັ້ນຈິດຄືຄວາມທໍ້ຖອຍແລະງ່ວງເຫງົາ)
໔. ອຸດທັດຈະກຸກກຸດຈະນິວອນ (ສິ່ງທີ່ກັ້ນຈິດຄືຄວາມຟຸ້ງຊ່ານແລະຮ້ອນໃຈ)
໕. ວິຈິກິດສານິວອນ (ສິ່ງທີ່ກັ້ນຈິດຄືຄວາມລັງເລສົງໄສ)

ນິວອນ ໕ ປະການນີ້ແລ

ມານົບ ໂປກຂະຣະສາຕິພາມ ໂອປະມັນຍະໂຄດ ຜູ້ເປັນໃຫຍ່ໃນປ່າຊື່ສຸພະຄະວັນ ຖືກນິວອນ ໕ ປະການນີ້ໝ່ວງໜ່ຽວ ກາງກັ້ນ ຮ້ອຍຮັດ ຍຶດຕຶງໄວ້ແລ້ວ ເປັນໄປບໍ່ໄດ້ເລີຍ ທີ່ເຂົາຈັກຮູ້ ຈັກເຫັນ ຫຼື ຈັກເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດອັນສາມາດ ວິເສດຍິ່ງກວ່າ ທຳຂອງມະນຸດ

[໔໖໗] ມານົບ ການມະຄຸນນີ້ມີ ໕ ປະການ

ການມະຄຸນ ໕ ປະການ ອັນໃດແດ່ ຄື

໑. ຮູບທີ່ຈະຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

໒. ສຽງທີ່ຈະຮູ້ແຈ້ງທາງຫູ ฯລฯ

໓. ກິ່ນທີ່ຈະຮູ້ແຈ້ງທາງດັງ ฯລฯ

໔. ຣົດທີ່ຈະຮູ້ແຈ້ງທາງລີ້ນ ฯລฯ

໕. ໂຜດຖັບພະທີ່ຈະຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ການມະຄຸນ ໕ ປະການນີ້ແລ

ໂປກຂະຣະສາຕິພາມ ໂອປະມັນຍະໂຄດ ຜູ້ເປັນໃຫຍ່ໃນປ່າຊື່ສຸພະຄະວັນ ກຳໜັດແລ້ວ ມົກມຸ່ນແລ້ວ ດ້ວຍການມະຄຸນ ໕ ປະການນີ້ ຖືກການມະຄຸນ ໕ ປະການນີ້ຄອບງຳແລ້ວ ບໍ່ເຫັນໂທດ ບໍ່ມີປັນຍາເປັນເຄື່ອງຖອນອອກ ບໍຣິໂພກຢູ່ ເປັນໄປບໍ່ໄດ້ເລີຍທີ່ເຂົາຈັກຮູ້ ຈັກເຫັນ ຫຼືຈັກເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດ ອັນສາມາດວິເສດຍິ່ງກວ່າທຳຂອງມະນຸດ

ມານົບ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸກຄົນຈະເພິ່ງອາໄສຫຍ້າ ແລະໄມ້ເປັນເຊື້ອໄຟເຜົາຂຶ້ນ ບໍອາໄສຫຍ້າແລະໄມ້ເປັນເຊື້ອໄຟເຜົາຂຶ້ນ ໄຟແນວໃດນໍ ຈະມີນໍ້າ ສີ ແລະ ແສງສະຫວ່າງ"

ສຸພະມານົບຂາບທູນວ່າ "ທ່ານພຣະໂຄດົມ ເປັນໄປໄດ້ບໍ? ຖ້າໄຟທີ່ບໍ່ມີຫຍ້າແລະໄມ້ເປັນເຊື້ອ ຈະມີນໍ້າ ສີ ແລະ ແສງສະຫວ່າງ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມານົບ ເປັນໄປບໍ່ໄດ້ເລີຍທີ່ບຸກຄົນຈະເພິ່ງໄຟເຜົາທີ່ບໍ່ມີຫຍ້າແລະໄມ້ເປັນເຊື້ອຂຶ້ນໄດ້ ນອກຈາກຜູ້ທີ່ມີລິດ ອຸປະມາຄືໄຟອາໄສຫຍ້າແລະໄມ້ເປັນເຊື້ອຈຶ່ງລຸກຮຸ່ງຂຶ້ນໄດ້ ແມ່ນສັນໃດ ເຮົາກ່າວປິຕິອັນອາໄສກາມມະຄຸນ ໕ ປະການວ່າມີອຸປະມາສັນນັ້ນຄືກັນ ອຸປະມາຄືໄຟທີ່ບໍ່ມີຫຍ້າ ແລະ ໄມ້ເປັນເຊື້ອລຸກຮຸ່ງຂຶ້ນໄດ້ ແມ່ນສັນໃດ ເຮົາກ່າວປິຕິທີ່ເວັ້ນຈາກກາມ ແລະ ອະກຸສົນທຳທັງຫລາຍວ່າ ມີອຸປະມາສັນນັ້ນຄືກັນ

ປິຕິທີ່ເວັ້ນຈາກກາມ ແລະ ອະກຸສົນທຳທັງຫລາຍ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມແລະອະກຸສົນທຳທັງຫລາຍແລ້ວ ບັນລຸປະຖົມຊານ ຯລຯ ຢູ່ ປິຕິນີ້ເວັ້ນຈາກກາມ ແລະ ອະກຸສົນທຳທັງຫລາຍ

ມານົບ ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸ ບັນລຸທຸຕິຍະຊານ ຯລຯ ຢູ່ ແມ່ນປິຕິນີ້ກໍເວັ້ນຈາກກາມ ແລະ ອະກຸສົນທຳທັງຫລາຍ

[໔໙໐] ມານົບ ໃນທຳ ໕ ປະການທີ່ພາມທັງຫລາຍບັນຍັດເພື່ອທຳບຸນ ເພື່ອຍັງກຸສົນທຳໃຫ້ສຳເລັດນີ້ ພາມທັງຫລາຍບັນຍັດທຳຂໍ້ໃດວ່າມີຜົນຫລາຍກວ່າ"

ສຸພະມານົບຂາບທູນວ່າ "ທ່ານພຣະໂຄດົມ ໃນທຳ ໕ ປະການທີ່ພາມທັງຫລາຍ ບັນຍັດເພື່ອທຳບຸນ ເພື່ອຍັງກຸສົນທຳໃຫ້ສຳເລັດນີ້ ພາມທັງຫລາຍບັນຍັດທຳຄືຈາຄະ ວ່າມີຜົນຫລາຍກວ່າ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ມານົບ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໃນທີ່ນີ້ຈະເພິ່ງມີມະຫາຍັນເກີດຂຶ້ນແກ່ພາມຄົນໜຶ່ງ ຄັ້ງນັ້ນ ພາມ ໘ ຄົນພາກັນມາດ້ວຍຫວັງວ່າ "ຈັກສະເຫວີຍມະຫາຍັນຂອງພາມຊື່ນີ້" ໃນພາມ ໘ ຄົນນັ້ນ ຄົນໜຶ່ງມີ ຄວາມຄິດແນວນີ້ວ່າ "ໂອ ເຮົາທໍ່ນັ້ນ ຄວນຈະໄດ້ອາສະນະທີ່ເລີດ ນໍ້າທີ່ເລີດ ແລະ ອາຫານທີ່ເລີດໃນໂຮງພັດ ພາມອື່ນບໍ່ຄວນໄດ້ອາສະນະທີ່ເລີດ ນໍ້າທີ່ເລີດ ແລະ ອາຫານທີ່ເລີດໃນໂຮງພັດເລີຍ" ເປັນໄປໄດ້ທີ່ພາມຄົນອື່ນຈະເພິ່ງໄດ້ອາສະນະທີ່ເລີດ ນໍ້າທີ່ເລີດ ແລະ ອາຫານທີ່ເລີດໃນໂຮງພັດ ສ່ວນພາມຜູ້ບໍ່ໄດ້ຍ່ອມຄຽດບໍ່ພໍໃຈວ່າ "ພາມອື່ນໄດ້ອາສະນະທີ່ເລີດ ນໍ້າທີ່ເລີດ ແລະ ອາຫານທີ່ເລີດໃນໂຮງພັດ ສ່ວນເຮົາກັບບໍ່ໄດ້"

ມານົບ ພວກທ່ານທັງຫລາຍບັນຍັດຜືນແຫ່ງກຳນີ້ໄວ້ແນວໃດ?"

ສຸພະມານົບທູນຕອບວ່າ "ທ່ານພຣະໂຄດົມ ໃນເລື້ອງນີ້ ພວກທ່ານທັງຫລາຍໃຫ້ທານດ້ວຍຄິດແນວນີ້ວ່າ "ພວກນັ້ນຖືກພວກຜູ້ນີ້ເຮັດໃຫ້ໂກດ ເຮັດໃຫ້ບໍ່ພໍໃຈ" ກໍເປັນໄປບໍ່ໄດ້ ໂດຍແທ້ທີ່ຈິງໃນເລື້ອງນີ້ ພວກທ່ານທັງຫລາຍໃຫ້ທານອັນເປັນການອະນຸເຄາະກັນທໍ່ນັ້ນ"

"ເມື່ອເປັນເຊັ່ນນັ້ນ ຂໍ້ທີ່ພວກທ່ານທັງຫລາຍໃຫ້ທານອັນເປັນການອະນຸເຄາະກັນນີ້ ກໍເປັນບຸນກິຣິຍາວັດຖຸຂໍ້ທີ່ ໖ ຂອງພວກທ່ານທັງຫລາຍບໍ?"

"ທ່ານພຣະໂຄດົມ ເມື່ອເປັນແນວນີ້ ຂໍ້ທີ່ພວກທ່ານທັງຫລາຍໃຫ້ທານອັນເປັນການອະນຸເຄາະນີ້ ກໍຈັກເປັນບຸນກິຣິຍາວັດຖຸຂໍ້ທີ່ ໖ ຂອງພວກທ່ານທັງຫລາຍ"

"ທຳ ໕ ປະການນີ້ ທີ່ພວກທ່ານທັງຫລາຍບັນຍັດ ເພື່ອທຳບຸນ ເພື່ອຍັງກຸສົນທຳ ໃຫ້ສຳເລັດທ່ານພິຈາລະນາເຫັນມີຫຼາຍໃນພວກໃດ ໃນພວກຄະຫຼືຫັດຫຼືພວກບັນພະຊິດ"

ສຸພະມານົບຂາບທູນວ່າ "ທ່ານພຣະໂຄດົມ ທຳ ໕ ປະການນີ້ ທີ່ພວກທ່ານທັງຫລາຍ ບັນຍັດເພື່ອທຳບຸນ ເພື່ອຍັງກຸສົນທຳໃຫ້ສຳເລັດ ຂ້າພະເຈົ້າພິຈາລະນາເຫັນມີຫຼາຍໃນບັນພະຊິດ ມີນ້ອຍໃນຄະຫຼືຫັດ ຍ້ອນຄະຫຼືຫັດມີຄວາມຕ້ອງການຫຼາຍ ມີກິດຫຼາຍ ມີເລື້ອງຫຼາຍ ມີຄວາມພຽນຫຼາຍຈະເປັນຜູ້ເວົ້າຈິງສະເໝີຕະຫຼອດໄປບໍ່ໄດ້ ສ່ວນບັນພະຊິດມີຄວາມຕ້ອງການໜ້ອຍ ມີກິດໜ້ອຍມີເລື້ອງໜ້ອຍ ມີຄວາມພຽນໜ້ອຍ ຈຶ່ງເປັນຜູ້ເວົ້າຈິງສະເໝີໄປ ຍ້ອນຄະຫຼືຫັດມີຄວາມຕ້ອງການຫຼາຍ ມີກິດຫຼາຍ ມີເລື້ອງຫຼາຍ ມີຄວາມພຽນຫຼາຍ ຈະເປັນຜູ້ມີຄວາມພຽນສະເໝີຕະຫຼອດໄປບໍ່ໄດ້

ฯລฯ ຈະເປັນຜູ້ປະພຶດພົມມະຈັນ

ฯລฯ ຈະເປັນຜູ້ຫຼາຍດ້ວຍການສາທະຍາຍ

ฯລฯ ຈະເປັນຜູ້ຫຼາຍດ້ວຍການບໍລິຈາກ ฯລฯ

ສ່ວນບັນພະຊິດມີຄວາມຕ້ອງການໜ້ອຍ ມີກິດໜ້ອຍ ມີເລື້ອງໜ້ອຍ ມີຄວາມພຽນໜ້ອຍຈຶ່ງເປັນຜູ້ມີຄວາມພຽນສະເໝີຕະຫຼອດໄປໄດ້

ฯລฯ ເປັນຜູ້ປະພຶດພົມມະຈັນ

ฯລฯ ເປັນຜູ້ຫຼາຍດ້ວຍການສາທະຍາຍ

ฯລฯ ເປັນຜູ້ຫຼາຍດ້ວຍການບໍລິຈາກ ฯລฯ

ທ່ານພຣະໂຄດົມ ທຳ ໕ ປະການນີ້ ທີ່ພານທັງຫລາຍບັນຍັດເພື່ອທຳບຸນ ເພື່ອຍັງກຸສົນທຳໃຫ້ສຳເລັດ ຂ້າພະເຈົ້າພິຈາລະນາເຫັນມີຫຼາຍໃນບັນພະຊິດ ມີໜ້ອຍໃນຄະຫຼືຫັດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມານົບ ທຳ ໕ ປະການ ທີ່ພານທັງຫລາຍບັນຍັດເພື່ອທຳບຸນ ເພື່ອຍັງກຸສົນທຳໃຫ້ສຳເລັດ ເຮົາກ່າວວ່າເປັນເຄື່ອງປຸງແຕ່ງຈິດ ເພື່ອ ອົບຮົມຈິດບໍ່ໃຫ້ມີເວນ ບໍ່ໃຫ້ມີຄວາມບຽດບຽນ

ພິກຂຸໃນທຳວິໄນນີ້ເປັນຜູ້ເວົ້າຈິງ ທ່ານຮູ້ສຶກວ່າ "ເຮົາເວົ້າຈິງ" ຈຶ່ງໄດ້ຄວາມຮູ້ອັດຖະ ໄດ້ຄວາມຮູ້ທຳ ໄດ້ຄວາມປາໂມດ ປະກອບດ້ວຍທຳ ຄວາມປາໂມດອັນປະກອບດ້ວຍກຸສົນນີ້ ທີ່ເຮົາກ່າວວ່າເປັນເຄື່ອງປຸງແຕ່ງຈິດ ເພື່ອອົບຮົມຈິດບໍ່ໃຫ້ມີເວນ ບໍ່ໃຫ້ມີຄວາມ ບຽດບຽນ

ພິກຂຸໃນທຳວິໄນນີ້ ເປັນຜູ້ມີຄວາມພຽນ

ຯລຯ ເປັນຜູ້ປະພຶດພົມມະຈັນ

ຯລຯ ເປັນຜູ້ຫຼາຍດ້ວຍການສາທະຍາຍ ຯລຯ

ພິກຂຸໃນທຳວິໄນນີ້ເປັນຜູ້ຫຼາຍດ້ວຍການບໍລິຈາກ ທ່ານຮູ້ສຶກວ່າ "ເຮົາເປັນຜູ້ຫຼາຍດ້ວຍການບໍລິຈາກ" ຈຶ່ງໄດ້ຄວາມຮູ້ອັດຖະ ໄດ້ຄວາມຮູ້ທຳ ໄດ້ຄວາມປາໂມດອັນປະກອບດ້ວຍທຳ ຄວາມປາໂມດອັນປະກອບດ້ວຍກຸສົນນີ້ ທີ່ເຮົາກ່າວວ່າເປັນເຄື່ອງປຸງແຕ່ງຈິດ ເພື່ອອົບຮົມຈິດບໍ່ໃຫ້ມີເວນ ບໍ່ໃຫ້ມີຄວາມບຽດບຽນ

ທຳ ໕ ປະການນີ້ ທີ່ພານທັງຫລາຍບັນຍັດເພື່ອທຳບຸນ ເພື່ອຍັງກຸສົນທຳໃຫ້ສຳເລັດ ເຮົາກ່າວວ່າເປັນເຄື່ອງປຸງແຕ່ງຈິດ ເພື່ອອົບຮົມຈິດບໍ່ໃຫ້ມີເວນ ບໍ່ໃຫ້ມີຄວາມບຽດບຽນ"

[໔໑໐] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ສຸພະມານົບຜູ້ເປັນບຸດຂອງໂຕເທຍຍະພານໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ທ່ານພຣະໂຄດົມ ຂ້າພະເຈົ້າໄດ້ຍິນເລື້ອງນີ້ມາວ່າ "ພຣະສະມະນະໂຄດົມຊົງຮູ້ຈັກທາງເພື່ອເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພົມບໍ?"

ພຣະຜູ້ມີພຣະພາກເຈົ້າຕັດຍ້ອນຖາມວ່າ "ມານົບ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ເຮືອນນະກາຣະຄາມກໍໃກ້ແຄ່ນີ້ ເຮືອນນະກາຣະຄາມກໍຢູ່ບໍ່ໄກຈາກທີ່ນີ້ເລີຍ ບໍ່ແມ່ນບໍ?"

"ແນວນັ້ນ ທ່ານພຣະໂຄດົມ ເຮືອນນະກາຣະຄາມກໍຢູ່ໃກ້ແຄ່ນີ້ ເຮືອນນະກາຣະຄາມກໍຢູ່ບໍ່ໄກຈາກທີ່ນີ້ເລີຍ"

"ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸຣຸດຜູ້ຈະເລີນໃຫຍ່ຂຶ້ນມາໃນເຮືອນນະກາຣະຄາມ

ນີ້ ອອກຈາກເຮືອນນະກາຣະຄາມໄປໃນຂະນະນັ້ນ ເມື່ອຖືກຖາມເຖິງທາງໄປເຮືອນນະກາຣະຄາມ ຈະສະແດງອາການຊັກຊ້າ ຫຼື ອຶກອັກຢູ່ບໍ່?"

"ບໍ່ຊັກຊ້າ ບໍ່ອຶກອັກເລີຍ ທ່ານພຣະໂຄດົມ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸຣຸດນັ້ນຈະເລີນໃຫຍ່ຂຶ້ນມາຢູ່ໃນເຮືອນນະກາຣະຄາມນັ້ນເອງ ຕ້ອງຮູ້ຈັກທາງຂອງເຮືອນນະກາຣະຄາມທຸກແຫ່ງເປັນຢ່າງດີ"

"ການທີ່ບຸຣຸດຈະເລີນໃຫຍ່ຂຶ້ນມາຢູ່ໃນເຮືອນນະກາຣະຄາມນັ້ນ ຖືກຖາມເຖິງທາງໄປເຮືອນນະກາຣະຄາມຈະບໍ່ຕອບຊັກຊ້າຫຼືອຶກອັກ ເມື່ອຕະຖາຄົດຖືກຖາມເຖິງພົມມະໂລກ ຫຼື ຂໍ້ປະຕິບັດໃຫ້ເຖິງພົມມະໂລກ ກໍບໍ່ຕອບຊັກຊ້າຫຼືອຶກອັກເຊັ່ນດຽວກັນ ເຮົາຮູ້ຈັກພົມມະໂລກແລະຂໍ້ປະຕິບັດໃຫ້ເຖິງພົມມະໂລກຂອງພາມທັງຫລາຍ ທັງຍັງຮູ້ວິທີທີ່ຄົນປະຕິບັດແນວໃດ ຈຶ່ງຈະເຂົ້າເຖິງພົມມະໂລກໄດ້ດ້ວຍ"

ສຸພະມານົບຂາບທູນວ່າ "ທ່ານພຣະໂຄດົມ ຂ້າພະເຈົ້າໄດ້ຍິນເລື້ອງນີ້ມາວ່າ ພຣະສະມະນະໂຄດົມຊົງສະແດງທາງເພື່ອເປັນສະຫາຍກັບພົມ ຂໍໂອກາດ ຂໍທ່ານພຣະໂຄດົມໂຜດຊົງສະແດງທາງເພື່ອເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພົມແກ່ຂ້າພະເຈົ້າດ້ວຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມານົບ ຖ້າເຊັ່ນນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ສຸພະມານົບຜູ້ເປັນບຸດຂອງໂຕເທີຍຍະພາມທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເລື້ອງນີ້ ວ່າ

## ທາງໄປພົມມະໂລກ

[໔໗໑] "ມານົບ ທາງເພື່ອເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພົມ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ມີເມດຕາຈິດ ແຜ່ໄປຕະຫຼອດທິດທີ່ ໑ ຢູ່ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດຂວາງ ແຜ່ໄປຕະຫຼອດໂລກທົ່ວທຸກ ໝູ່ເຫຼົ່າ ໃນບ່ອນທຸກສະຖານດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມເບີບດບຽນຢູ່ ເມື່ອພິກຂຸນັ້ນ ຈະເລີນເມດຕາເຈໂຕວິມຸດຕິແນວນີ້ແລ້ວ ກຳໃດເປັນປະມານທີ່ພິກຂຸເຮັດແລ້ວ ກຳນັ້ນຈັກບໍ່ເຫຼືອຢູ່ ບໍ່ຄົງຢູ່ໃນກຳອັນເປັນຮູປາວະຈອນນັ້ນ ປຽບເໝືອນຄົນແຂງແຮງເປົ່າສັງມີສຽງດັງເຮັດໃຫ້ຄົນຮັບຮູ້ໄດ້ຕະຫຼອດທິດທັງ ໔ ໄດ້ໂດຍບໍ່ຍາກ ແມ່ນສັນໃດ ເມື່ອພິກຂຸນັ້ນ ຈະເລີນເມດຕາເຈໂຕວິມຸດຕິແນວນີ້ແລ້ວ ກຳໃດເປັນປະມານທີ່ພິກຂຸເຮັດແລ້ວ ກຳນັ້ນຈັກບໍ່ເຫຼືອຢູ່ ບໍ່ຄົງຢູ່ໃນກຳອັນເປັນຮູປາວະຈອນນັ້ນ ກໍສັນນັ້ນຄືກັນ ນີ້ເປັນທາງເພື່ອເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພົມ

ມີ ກະລຸນາຈິດ ໆລໆ

ມີ ມຸທິຕາຈິດ ໆລໆ

ມີອຸເປກຂາຈິດ ແຜ່ໄປຕະຫຼອດທິດທີ່ ໑ ຢູ່ ທິດທີ ໒ ໆລໆ ທິດທີ ໓ ໆລໆ ທິດທີ ໔ ໆລໆ ທິດ ເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນບ່ອນທຸກສະຖານດ້ວຍ ອຸເປກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ເມື່ອພິກຂຸນັ້ນຈະເລີນອຸເປກຂາເຈໂຕວິມຸດຕິແນວນີ້ແລ້ວ ກຳໃດເປັນປະມານທີ່ພິກຂຸເຮັດແລ້ວ ກຳນັ້ນຈັກບໍ່ເຫຼືອຢູ່ ບໍ່ຄົງຢູ່ໃນກຳອັນເປັນຮູປາວະຈອນນັ້ນ

ມານົບ ຄົນແຂງແຮງ ເປົ່າສັງເພິ່ງໃຫ້ຄົນຮູ້ຕະຫຼອດທິດທັງ ໔ ໄດ້ໂດຍບໍ່ຍາກ ແມ່ນສັນໃດ ເມື່ອພິກຂຸນັ້ນຈະເລີນອຸເປກຂາເຈໂຕວິມຸດຕິແນວນີ້ແລ້ວ ກຳໃດເປັນປະມານທີ່ພິກຂຸເຮັດແລ້ວ ກຳນັ້ນຈັກບໍ່ເຫຼືອຢູ່ ບໍ່ຄົງຢູ່ໃນກຳອັນເປັນຮູປາວະຈອນນັ້ນ ກໍສັນນັ້ນຄືກັນ ນີ້ເປັນທາງເພື່ອເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພົມ"

[໔໗໔] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ສຸພະມານົບຜູ້ເປັນບຸດຂອງ ໂຕເທີຍຍະພາມ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະອົງຊົງປະກາດທຳ ແຈ້ງຊັດໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ່ຳ ໄຂຂອງທີ່ອັດ ບອກ ທາງແກ່ຄົນຫລົງທາງ ຫຼືເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນຮູບໄດ້" ຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

ຂ້າແດ່ ທ່ານພຣະໂຄດົມ ຖ້າເຊັ່ນນັ້ນ ຂ້າພຣະອົງຂໍທູນລາກັບ ຍ້ອນມີກິດ ມີໜ້າທີ່ ທີ່ຈະຕ້ອງເຮັດອີກຫຼາຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ມານົບ ທ່ານຈົ່ງກຳນົດເວລາອັນສົມຄວນໃນບັດນີ້ເທີ້ນ"

ຄັ້ງນັ້ນ ສຸພະມານົບຜູ້ເປັນບຸດຂອງໂຕເທີຍຍະພາມ ຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວລຸກຈາກບ່ອນນັ່ງ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ທຳປະທັກສິນແລ້ວຈາກໄປ

ສະໄໝນັ້ນ ພາມຊື່ຊານຸດໂສນິອອກຈາກນະຄອນສາວັດຖີ ດ້ວຍລົດທຽມດ້ວຍມ້າຂາວ

ປອດຕັ້ງແຕ່ຍັງເວັນ ໄດ້ເຫັນສຸພະມານົບຜູ້ເປັນບຸດຂອງໂຕເທີຍຍະພາມຍ່າງມາແຕ່ໄກ ຈຶ່ງໄດ້ຖາມວ່າ "ທ່ານພາຣະທະວາຊະ ທ່ານມາຈາກໄສແຕ່ຍັງເວັນຫຼວ"

ສຸພະມານົບຜູ້ເປັນບຸດຂອງໂຕເທີຍຍະພາມຕອບວ່າ "ທ່ານຜູ້ຈະເລີນ ຂ້າພະເຈົ້າ ມາຈາກສຳນັກຂອງພຣະສະມະນະໂຄດົມ"

ຊານຸດໂສນີພາມຖາມວ່າ "ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ທ່ານພາຣະທະວາຊະເຫັນຈະເປັນບັນດິດຮູ້ທົ່ທັນພຣະປັນຍາອັນແຫຼມຄົມຂອງພຣະສະມະນະໂຄດົມເປັນແນ່"

ສຸພະມານົບຕອບວ່າ "ທ່ານຜູ້ຈະເລີນ ຂ້າພະເຈົ້າເປັນໃຜ ແລະເປັນອັນໃດນໍ? ຈຶ່ງຈັກຮູ້ທົ່ທັນພຣະປັນຍາອັນແຫຼມຄົມຂອງພຣະສະມະນະໂຄດົມ ຜູ້ໃດຈະເພິ່ງຮູ້ທົ່ທັນພຣະປັນຍາ ອັນແຫຼມຄົມຂອງພຣະສະມະນະໂຄດົມ ຜູ້ນັ້ນກໍເພິ່ງເປັນເຊັ່ນພຣະສະມະນະໂຄດົມເປັນແນ່"

ຊານຸດໂສນີພາມຖາມວ່າ "ໄດ້ຟັງວ່າ ທ່ານພາຣະທະວາຊະສັນເສີນພຣະສະມະນະໂຄດົມ ດ້ວຍການສັນເສີນຢ່າງຍິ່ງ"

ສຸພະມານົບຕອບວ່າ "ທ່ານຜູ້ຈະເລີນ ຂ້າພະເຈົ້າເປັນໃຜ ເປັນອັນໃດນໍ? ຈຶ່ງຈັກສັນເສີນພຣະສະມະນະໂຄດົມ ທ່ານພຣະສະມະນະໂຄດົມປະເສີດກວ່າເທວະດາແລະມະນຸດທັງຫລາຍ ເທວະດາແລະມະນຸດທັງຫລາຍຈຶ່ງສັນເສີນແລ້ວສັນເສີນອີກ ອັນໜຶ່ງ ທຳ ໕ ປະການນີ້ທີ່ພາມທັງຫລາຍບັນຍັດ ເພື່ອທຳບຸນ ເພື່ອຍັງກຸສົນທຳໃຫ້ສຳເລັດ ພຣະສະມະນະໂຄດົມ ຕັດວ່າ ເປັນເຄື່ອງປຸງແຕ່ງຈິດ ເພື່ອອົບຮົມຈິດບໍ່ໃຫ້ມີເວນ ບໍ່ໃຫ້ມີຄວາມບຽດບຽນ"

ເມື່ອສຸພະມານົບຜູ້ເປັນບຸດຂອງໂຕເທີຍຍະພາມກ່າວແນວນີ້ແລ້ວ ຊານຸດໂສນີພາມຈຶ່ງລົງຈາກລົດອັນຫຽມດ້ວຍມ້າຂາວປອດແລ້ວຫົ່ມຜ້າບ່ຽງບ່າ ປະນົມມືໄປທາງທິດ ທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ແລ້ວເປ່ງອຸທານວ່າ "ເປັນລາບຂອງພຣະເຈົ້າປະເສນທິໂກສົນ ພຣະເຈົ້າປະເສນທິໂກສົນຊົງໄດ້ດີແລ້ວ ທີ່ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າປະທັບຢູ່ໃນແວ່ນແຄວ້ນຂອງພຣະອົງ" ດັ່ງນີ້ແລ

**ສຸພະສູດທີ ໗ ຈົບ**

# ໑໐. ສັງຄາຣະວະສູດ

## ວ່າດ້ວຍມານົບຊື່ສັງຄາຣະວະ

[໔໗໓] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸໝູ່ໃຫຍ່ ສະໄໝນັ້ນ ນາງພຣາມມະນີຊື່ທນັນຊານີ ອາໄສຢູ່ໃນເຮືອນຊື່ປັນຈະຣະກັບປະ ເປັນຜູ້ເຫຼື້ອມໃສຢ່າງຍິ່ງໃນພຣະພຸດທະເຈົ້າ ພຣະທຳ ແລະພຣະສົງ ຫາກນາງຜິດພາດແລ້ວຈະເປັ່ງອຸທານຂຶ້ນ ໓ ຄັ້ງວ່າ

"ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ

ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ

ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ"

ສະໄໝນັ້ນ ມານົບຊື່ສັງຄາຣະຫວະອາໄສຢູ່ໃນເຮືອນປັນຈະຣະກັບປະ ຈົບໄຕຣເພດພ້ອມທັງນິກຄັນທຸສາດ ເກຕຸພະສາດ ພ້ອມອັກສອນສາດແລະປະຫວັດສາດ ເຂົ້າໃຈໂຕບົດແລະໄວຍາກອນ ຊ່ຽວຊານໂລກາຍະຕະສາດແລະລັກສະນະມະຫາບຸຣຸດ ເມື່ອນາງທນັນຊານີພຣາມມະນີກ່າວວາຈາແບບນີ້ ເຂົາໄດ້ຟັງແລ້ວຈຶ່ງກ່າວກັບນາງທນັນຊານີພຣາມມະນີວ່າ

"ນາງທະນັນຊານີພາມມະນີ ບໍ່ເປັນມຸງຄຸນເລີຍ ນາງທະນັນຊານີພາມມະນີເປັນຄົນສູນຫາຍ ເມື່ອພາມທັງຫລາຍຜູ້ຊົງໄຕຣເພດມີຢູ່ ນາງກັບໄປກ່າວສັນເສີນຄຸນຂອງສະມະນະຫົວໂລ້ນເຮັດຫຍັງ"

ນາງທະນັນຊານີພຣາມມະນີກ່າວວ່າ "ທ່ານ ທ່ານຍັງບໍ່ຮູ້ຈັກສີນແລະປັນຍາ ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຖ້າທ່ານຮູ້ຈັກສີນແລະປັນຍາຂອງພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນດີ ທ່ານຈະບໍ່ສຳຄັນພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນວ່າ ຄວນຖືກດ່າ ຄວນຖືກ ຕຳໜິເລີຍ"

ສັງຄາຣະວະມານົບກ່າວວ່າ "ນາງຜູ້ຈະເລີນ ຖ້າເຊັ່ນນັ້ນ ພຣະສະມະນະມາເຖິງເຮືອນປັດຈົນກັບປະ ເມື່ອໃດ ເພິ່ງບອກສັນເມື່ອນັ້ນ" ນາງທນັນຊານີພຣາມມະນີຮັບຄຳແລ້ວ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນຕາມລຳດັບ ສະເດັດເຖິງເຮືອນປັນຈະຣະກັບປະ ໄດ້ຂ່າວວ່າ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນສວນໝາກມ່ວງຂອງພາມຊາວບ້ານໂຕເທຍຍະ ໃກ້ເຮືອນປັນຈະຣະກັບປະ ນາງທນັນຊານີພຣາມມະນີໄດ້

ຟັງວ່າ "ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າ ສະເດັດມາເຖິງເຮືອນປັນຈະຣະກັບປະ ປະທັບຢູ່ໃນສວນໝາກມ່ວງຂອງພາມຊາວບ້ານໂຕເທຍຍະໃກ້ເຮືອນປັນຈະຣະກັບປະ" ລໍາດັບນັ້ນ ນາງຈຶ່ງເຂົ້າໄປຫາ ສັງຄາຣະວະມານົບຣອດບ່ອນຢູ່ແລ້ວໄດ້ກ່າວວ່າ

"ທ່ານ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ສະເດັດມາເຖິງເຮືອນປັນຈະຣະກັບປະ ປະທັບຢູ່ໃນສວນໝາກມ່ວງຂອງພຣາມຫນ໌ຊາວບ້ານໂຕເທຍຍະ ໃກ້ເຮືອນປັນຈະຣະກັບປະ ທ່ານຈຶ່ງກໍານົດ ເວລາອັນສົມຄວນໃນບັດນີ້ເທີ້ນ"

## ຄວາມຕ່າງກັນແຫ່ງສະມະນະພາມ

[໔໗໔] ສັງຄາຣະວະມານພຣັບຄໍາແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຣອດບ່ອນຢູ່ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ

"ທ່ານພຣະໂຄດົມ ມີສະມະນະພາມພວກໜຶ່ງ ເປັນຜູ້ມີບາຣະມີຂັ້ນສຸດທ້າຍຍ້ອນຮູ້ຍິ່ງໃນປັດຈຸບັນຍ່ອມປະຕິຍານອາທິພົມມະຈັນ໑ໃນສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດເປັນຜູ້ມີບາຣະມີຂັ້ນສຸດທ້າຍຍ້ອນຮູ້ຍິ່ງໃນປັດຈຸບັນຍ່ອມປະຕິຍານອາທິພົມມະຈັນ ບັນດາສະມະນະພາມເຫຼົ່ານັ້ນ ທ່ານພຣະໂຄດົມຈັດຢູ່ໃນພວກໃດ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາຣະທະວາຊະ ເຮົາກ່າວຄວາມຕ່າງກັນແຫ່ງສະມະນະ-ພາມທັງຫລາຍຜູ້ມີບາຣະມີຂັ້ນສຸດທ້າຍຍ້ອນຮູ້ຍິ່ງໃນປັດຈຸບັນ ແມ່ນຈະປະຕິຍານອາທິ-ພົມມະຈັນໄດ້ ມີສະມະນະພາມພວກໜຶ່ງເປັນຜູ້ຟັງຕາມກັນມາ ຍ້ອນການຟັງຕາມກັນມານັ້ນຈຶ່ງເປັນຜູ້ມີບາຣະມີຂັ້ນສຸດທ້າຍ ຍ້ອນຮູ້ຍິ່ງໃນປັດຈຸບັນຈຶ່ງປະຕິຍານອາທິພົມມະຈັນ ຄືພາມທັງຫລາຍຜູ້ຊີງໄຕຣເພດ ອັນໜຶ່ງ ມີສະມະນະພາມພວກໜຶ່ງເປັນຜູ້ມີບາຣະມີຂັ້ນສຸດທ້າຍຍ້ອນຮູ້ຍິ່ງໃນປັດຈຸບັນຈຶ່ງປະຕິຍານອາທິພົມມະຈັນຍ້ອນພຽງແຕ່ຄວາມເຊື່ອ ແນວດຽວ ປຽບຄືພາມທັງຫລາຍຜູ້ເປັນນັກຕັກກະ ເປັນນັກອະພິປັດຊະຍາ໑ ມີສະມະນະພາມພວກໜຶ່ງຮູ້ທໍາດ້ວຍປັນຍາອັນຍິ່ງເອງໃນທໍາທັງຫລາຍທີ່ບໍ່ເຄີຍຟັງມາກ່ອນ ມີບາຣະມີຂັ້ນສຸດທ້າຍ ຍ້ອນຮູ້ຍິ່ງໃນປັດຈຸບັນຈຶ່ງປະຕິຍານອາທິພົມມະຈັນ

ໃນສະມະນະພາມເຫຼົ່ານັ້ນ ສະມະນະພາມເຫຼົ່າໃດຮູ້ທໍາດ້ວຍປັນຍາອັນຍິ່ງເອງໃນທໍາທັງຫລາຍທີ່ບໍ່ເຄີຍຟັງມາກ່ອນ ມີບາຣະມີຂັ້ນສຸດທ້າຍຍ້ອນຮູ້ຍິ່ງໃນປັດຈຸບັນ ຈຶ່ງປະຕິຍານ ອາທິພົມມະຈັນ ບັນດາສະມະນະພາມເຫຼົ່ານັ້ນ ເຮົາກໍຄືນໜຶ່ງ

ພາຣະທະວາຊະ ຂໍ້ນີ້ເພິ່ງຮູ້ໄດ້ດ້ວຍບັນລະຍາຍແມ່ນນີ້ ປຽບຄືສະມະນະພາມເຫຼົ່າໃດ ຮູ້

ທຳດ້ວຍປັນຍາອັນຍິ່ງເອງ ໃນທຳທັງຫລາຍທີ່ບໍ່ເຄີຍໄດ້ຟັງມາກ່ອນ ມີບາຣະມີຂັ້ນສຸດທ້າຍ ຍ້ອນຮູ້ຍິ່ງໃນປັດຈຸບັນ ຈຶ່ງປະຕິຍານອາທິພົມມະຈັນ ບັນດາສະມະນະພາມເຫຼົ່ານັ້ນ ເຮົາກໍຄົນໜຶ່ງ

## ພຸດທະປະຫວັດຕອນພໍ່າເພັງສະມາບັດ

## ໃນສຳນັກອາລາຣະດາບົດ

[໔໗໕] ພາຣະທະວາຊະ ກ່ອນການຕັດສະຮູ້ ເຮົາຍັງເປັນພຣະໂພທິສັຕວ໌ ຍັງບໍ່ໄດ້ຕັດສະຮູ້ ໄດ້ມີຄວາມຄິດແນວນີ້ວ່າ "ການຢູ່ຄອງເຮືອນເປັນເລື້ອງອຶດອັດ ເປັນທາງມາແຫ່ງທຸລິການ ບັນພະຊາເປັນທາງປອດໂປ່ງ ການທີ່ເຮົາຢູ່ຄອງເຮືອນ ຈະປະພຶດພົມມະຈັນໃຫ້ ບໍລິສຸດບໍລິບູນຄົບຖ້ວນ ຄືຫອຍສັງຂັດບໍ່ແມ່ນເຮັດໄດ້ງ່າຍ ທາງທີ່ດີ ເຮົາຄວນແຖຜົມແລະ ໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກບວຊເປັນບັນພະຊິດ"

ໃນການຕໍ່ມາ ເຮົາຍັງໜຸ່ມແໜ້ນແຂງແຮງ ມີເກສາດຳປອດ ຢູ່ໃນປະຖົມວັຍ ເມື່ອ ພຣະຣາຊະມານດາແລະພຣະຣາຊະບິດາບໍ່ຊົງປາຖະໜາຈະໃຫ້ຜະນວຊ ມີພຣະພັກນອງດ້ວຍ ນ້ຳພຣະເນດຊົງກັນແສງຢູ່ ຈຶ່ງແຖຜົມແລະໜວດ ນຸ່ງຫົ່ມຜ້າກາສາວະພັດ ອອກຈາກວັງ ບວດເປັນບັນພະຊິດ ເມື່ອບວດແລ້ວກໍສະແຫວງຫາວ່າອັນໃດເປັນກຸສົນ ຂະນະທີ່ສະແຫວງຫາທາງອັນປະເສີດ ຄືຄວາມສະງົບເຊິ່ງບໍ່ມີທາງອື່ນຍິ່ງກວ່າ ໄດ້ເຂົ້າໄປຫາອາລາຣະດາບົດ ກາລາມະໂຄດແລ້ວກ່າວວ່າ

"ທ່ານກາລາມະ ຂ້າພະເຈົ້າປາຖະໜາຈະປະພຶດພົມມະຈັນໃນທຳວິໄນນີ້"

ເມື່ອເຮົາກ່າວແນວນີ້ ອາລາຣະດາບົດ ກາລາມະໂຄດຈຶ່ງກ່າວກັບເຮົາວ່າ "ເຊີນທ່ານ ຢູ່ກ່ອນ ທຳນີ້ກໍເປັນເຊັ່ນດຽວກັບທຳທີ່ວິນຍູຊົນຈະເພິ່ງເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງ ຕາມແບບອາຈານຂອງຕົນ ເຂົ້າເຖິງຢູ່ໄດ້ໃນເວລາບໍ່ດົນ" ຈາກນັ້ນບໍ່ດົນ ເຮົາກໍຮຽນຮູ້ທຳນັ້ນໄດ້ຢ່າງວ່ອງໄວ ຊົ່ວຂະນະອັດປາກຈົບເຈລະຈາປາໄສທໍ່ນັ້ນ ກໍກ່າວຍານວາທະ໑ແລະເຖຣວາທະ໘ໄດ້ ທັງເຮົາແລະຜູ້ອື່ນກໍຮູ້ຊັດວ່າ "ເຮົາຮູ້ ເຮົາຫ◌ັນ" ເຮົາຈຶ່ງຄິດວ່າ "ອາລາຣະດາບົດ ກາລາມະໂຄດປະກາດທຳນີ້ ດ້ວຍເຫດພຽງຄວາມເຊື່ອແນວດຽວວ່າ "ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ກໍເປັນໄປບໍ່ໄດ້ ແຕ່ອາລາຣະດາບົດ ກາລາມະໂຄດ ຍັງຮູ້ ຍັງເຫັນທຳນີ້ດ້ວຍປັນຍາອັນຍິ່ງເອງແນ່ນອນ"

ຈາກນັ້ນ ເຮົາຈຶ່ງເຂົ້າໄປຫາອາລາຣະດາບົດ ກາລາມະໂຄດແລ້ວຖາມວ່າ "ທ່ານກາລາມະ ທ່ານປະກາດທຳນີ້ວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່" ດ້ວຍເຫດ ພຽງທໍ່ໃດ"

ເມື່ອເຮົາຖາມແນວນີ້ແລ້ວ ອາລາຣະດາບົດ ກາລາມະໂຄດຈຶ່ງປະກາດອາກິນຈັນຍາຍະຕະນະ-ສະມາບັດແກ່ເຮົາ ເຮົາຈຶ່ງຄິດວ່າ "ບໍ່ແມ່ນແຕ່ອາລາຣະດາບົດ ກາລາມະໂຄດທີ່ນັ້ນທີ່ມີສັດທາ ແມ່ນເຮົາກໍມີສັດທາ ມີວິຣິຍະໆລໆ ມີສະຕິໆລໆ ມີສະມາທິໆລໆ ບໍ່ແມ່ນແຕ່ອາລາຣະດາບົດ ກາລາມະໂຄດທີ່ນັ້ນທີ່ມີປັນຍາ ແມ່ນເຮົາກໍມີປັນຍາ ທາງທີ່ດີ ເຮົາຄວນພ່ຳເພັງພຽນ ເພື່ອເຮັດໃຫ້ແຈ້ງທຳທີ່ອາລາຣະດາບົດ ກາລາມະໂຄດປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່" ຈາກນັ້ນບໍ່ດົນເຮົາກໍບັນລຸທຳນັ້ນດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່

ຈາກນັ້ນ ເຮົາຈຶ່ງເຂົ້າໄປຫາອາລາຣະດາບົດ ກາລາມະໂຄດແລ້ວຖາມວ່າ "ທ່ານກາລາມະ ທ່ານປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງທີ່ນີ້ບໍ"

ອາລາຣະດາບົດຕອບວ່າ "ທ່ານຜູ້ມີອາຍຸ ເຮົາປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງທີ່ນີ້ແລ"

(ເຮົາຈຶ່ງກ່າວວ່າ) "ທ່ານກາລາມະ ແມ່ນຂ້າພະເຈົ້າກໍເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ດ້ວຍເຫດພຽງທີ່ນີ້"

(ອາລາຣະດາບົດ ກາລາມະໂຄດກ່າວວ່າ) "ທ່ານຜູ້ມີອາຍຸ ເປັນລາບຂອງພວກຂ້າພະເຈົ້າ ພວກຂ້າພະເຈົ້າໄດ້ດີແລ້ວທີ່ໄດ້ພົບເພື່ອນພົມມະຈາຣີເຊັ່ນທ່ານ ຍ້ອນຂ້າພະເຈົ້າປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳໃດດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ທ່ານເຮັດໃຫ້ແຈ້ງທຳນັ້ນດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່" ທ່ານເຮັດໃຫ້ແຈ້ງທຳໃດດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ຂ້າພະເຈົ້າກໍປະກາດວ່າ "ຂ້າພະເຈົ້າເຮັດໃຫ້ແຈ້ງທຳນັ້ນດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ຂ້າພະເຈົ້າຮູ້ທຳໃດ ທ່ານກໍຮູ້ທຳນັ້ນ ທ່ານຮູ້ທຳໃດ ຂ້າພະເຈົ້າກໍຮູ້ ທຳນັ້ນ ເປັນອັນວ່າຂ້າພະເຈົ້າເປັນເຊັ່ນໃດ ທ່ານກໍເປັນເຊັ່ນນັ້ນ ທ່ານເປັນເຊັ່ນໃດ ຂ້າພະເຈົ້າ ກໍເປັນເຊັ່ນນັ້ນ ມາເທີ້ນ ບັດນີ້ ເຮົາທັງສອງຈະຢູ່ຮ່ວມກັນບໍລິຫານຄະນະນີ້"

ພາຣະທະວາຊະ ອາລາຣະດາບົດ ກາລາມະໂຄດ ທັງທີ່ເປັນອາຈານຂອງເຮົາ ກໍຍ້ອງຍໍເຮົາ ຜູ້ເປັນສິດໃຫ້ສະເໝີກັບຕົນ ແລະບູຊາເຮົາດ້ວຍການບູຊາຢ່າງດີ ດ້ວຍປະການແນວນີ້ ແຕ່ເຮົາຄິດວ່າ "ທຳນີ້ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ແລະເພື່ອນິບພານ ເປັນໄປພຽງເພື່ອເຂົ້າເຖິງອາກິນຈັນຍາຍະຕະນະສະມາບັດທີ່ນັ້ນ" ເຮົາບໍ່ພໍໃຈ ເບື່ອໜ່າຍທຳນັ້ນ ຈຶ່ງລາຈາກໄປ

## ໃນສຳນັກອຸທະກະດາບົດ

[໔໗໖] ພາຣະທະວາຊະ ເຮົານັ້ນສະແຫວງຫາວ່າອັນໃດເປັນກຸສົນ ຂະນະທີ່ສະແຫວງຫາທາງອັນປະເສີດຄືຄວາມສະງົບເຊິ່ງບໍ່ມີທາງອື່ນຍິ່ງກວ່າ ໄດ້ເຂົ້າໄປຫາອຸທະກະດາບົດ ຣາມະບຸດແລ້ວ ກ່າວວ່າ “ທ່ານຣາມະ ຂ້າພະເຈົ້າປາຖະໜາຈະປະພຶດພົມມະຈັນໃນທຳວິໄນນີ້”

ເມື່ອເຮົາກ່າວແນວນີ້ແລ້ວ ອຸທະກະດາບົດ ຣາມະບຸດຈຶ່ງກ່າວກັບເຮົາວ່າ “ເຊີນທ່ານຢູ່ກ່ອນ ທຳນີ້ກໍເປັນເຊັ່ນດຽວກັບທຳທີ່ວິນຍູຊົນຈະເພິ່ງເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງ ຕາມແບບ ອາຈານຂອງຕົນເຂົ້າເຖິງຢູ່ໄດ້ໃນເວລາບໍ່ດົນ” ຈາກນັ້ນບໍ່ດົນ ເຮົາກໍຮຽນຮູ້ທຳນັ້ນໄດ້ຢ່າງວ່ອງໄວ ຊົ່ວຂະນະອັດປາກຈົບເຈລະຈາປາໄສທໍ່ນັ້ນ ກໍກ່າວຍານວາທະແລະເຖຣະ-ວາທະໄດ້ທັງເຮົາແລະຜູ້ອື່ນກໍຮູ້ຊັດວ່າ “ເຮົາຮູ້ ເຮົາເຫັນ” ເຮົາຈຶ່ງຄິດວ່າ “ອຸທະກະດາບົດ ຣາມະບຸດປະກາດທຳນີ້ດ້ວຍເຫດພຽງຄວາມເຊື່ອແນວດຽວວ່າ “ເຮົາເຮັດໃຫ້ແຈ້ງດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່” ກໍເປັນໄປບໍ່ໄດ້ ແຕ່ອຸທະກະດາບົດ ຣາມະບຸດຍັງຮູ້ ຍັງເຫັນທຳ ນີ້ດ້ວຍປັນຍາອັນຍິ່ງເອງແນ່ນອນ”

ຈາກນັ້ນ ເຮົາຈຶ່ງເຂົ້າໄປຫາອຸທະກະດາບົດ ຣາມະບຸດແລ້ວຖາມວ່າ “ທ່ານຣາມະ ທ່ານປະກາດວ່າ “ຂ້າພະເຈົ້າເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່” ດ້ວຍເຫດພຽງທໍ່ໃດ?”

ເມື່ອເຮົາຖາມແນວນີ້ແລ້ວ ອຸທະກະດາບົດ ຣາມະບຸດຈຶ່ງປະກາດເນວະສັນຍານາສັນຍາຍະຕະນະສະມາບັດແກ່ເຮົາ ເຮົາຈຶ່ງຄິດວ່າ “ບໍ່ແມ່ນແຕ່ອຸທະກະດາບົດຣາມະບຸດທໍ່ນັ້ນທີ່ມີສັດທາແມ່ນເຮົາກໍມີສັດທາ ຯລຯ ມີວິຣິຍະ ຯລຯ ມີສະຕິ ຯລຯ ມີສະມາທິ ຯລຯ ບໍ່ແມ່ນແຕ່ອຸທະກະດາບົດ ຣາມະບຸດທໍ່ນັ້ນທີ່ມີປັນຍາ ແມ່ນເຮົາກໍມີປັນຍາ ທາງທີ່ດີ ເຮົາຄວນເລີ່ມພໍ່າເພັງພຽນເພື່ອເຮັດໃຫ້ແຈ້ງທຳທີ່ອຸທະກະດາບົດ ຣາມະບຸດປະກາດວ່າ “ຂ້າພະເຈົ້າເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່” ຈາກນັ້ນບໍ່ດົນເຮົາກໍເຮັດໃຫ້ແຈ້ງທຳນັ້ນດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່

ຈາກນັ້ນ ເຮົາຈຶ່ງເຂົ້າໄປຫາອຸທະກະດາບົດ ຣາມະບຸດແລ້ວຖາມວ່າ “ທ່ານຣາມະ ທ່ານປະກາດວ່າ “ຂ້າພະເຈົ້າເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່” ດ້ວຍເຫດພຽງທໍ່ນີ້ບໍ?”

ອຸທະກະດາບົດ ຣາມະບຸດຕອບວ່າ “ທ່ານຜູ້ມີອາຍຸ ຂ້າພະເຈົ້າປະກາດວ່າ “ຂ້າພະເຈົ້າເຮັດໃຫ້ແຈ້ງທຳນີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່” ດ້ວຍເຫດພຽງທໍ່ນີ້ແລ”

(ເຮົາຈຶ່ງກ່າວວ່າ) “ແມ່ນຂ້າພະເຈົ້າກໍເຮັດໃຫ້ແຈ້ງທໍານີ້ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ດ້ວຍເຫດພຽງທໍ່ນີ້”

(ອຸທະກະດາບົດ ຣາມະບຸດກ່າວວ່າ) “ທ່ານຜູ້ມີອາຍຸ ເປັນລາບຂອງພວກຂ້າພະເຈົ້າ ພວກຂ້າພະເຈົ້າໄດ້ດີແລ້ວທີ່ໄດ້ພົບເພື່ອນພົມມະຈາຣີເຊັ່ນທ່ານ ຍ້ອນ(ຂ້າພະເຈົ້າ) ຣາມະປະກາດ ວ່າ “ຂ້າພະເຈົ້າເຮັດໃຫ້ແຈ້ງທໍາໃດດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ທ່ານກໍເຮັດໃຫ້ແຈ້ງທໍານັ້ນ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ທ່ານເຮັດໃຫ້ແຈ້ງທໍາໃດດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ ຣາມະກໍປະກາດວ່າ “ຂ້າພະເຈົ້າເຮັດໃຫ້ແຈ້ງທໍານັ້ນດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່” ຣາມະຮູ້ທໍາໃດ ທ່ານກໍຮູ້ທໍານັ້ນ ທ່ານຮູ້ທໍາໃດ ຣາມະກໍຮູ້ທໍານັ້ນ ເປັນອັນວ່າຣາມະເປັນເຊັ່ນໃດ ທ່ານກໍເປັນເຊັ່ນນັ້ນ ທ່ານເປັນເຊັ່ນໃດ ຣາມະກໍເປັນເຊັ່ນນັ້ນມາເທີ້ນ ບັດນີ້ ທ່ານຈົ່ງບໍລິຫານຄະນະນີ້”

ພາຣະທະວາຊະ ອຸທະກະດາບົດ ຣາມະບຸດທັງທີ່ເປັນເພື່ອນພົມມະຈາຣີຂອງເຮົາ ກໍຍ້ອງຍໍເຮົາ ໄວ້ໃນຖານະອາຈານ ແລະບູຊາເຮົາດ້ວຍການບູຊາຢ່າງດີດ້ວຍປະການແນວນີ້ ແຕ່ເຮົາຄິດວ່າ “ທໍານີ້ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກໍາໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ແລະເພື່ອນິບພານ ເປັນໄປພຽງເພື່ອເຂົ້າເຖິງເນວະສັນຍານາສັນຍາຍະຕະນະສະມາບັດ ທໍ່ນັ້ນ ເຮົາບໍ່ພໍໃຈ ເບື່ອໜ່າຍທໍານັ້ນ ຈຶ່ງລາຈາກໄປ

## ຊົງພໍ່າເພັງພຽນ

[໔໗໗] ພາຣະທະວາຊະ ເຮົານັ້ນສະແຫວງຫາວ່າອັນໃດເປັນກຸສົນ ຂະນະທີ່ສະແຫວງຫາທາງ ອັນປະເສີດຄືຄວາມສະງົບເຊິ່ງບໍ່ມີທາງອື່ນຍິ່ງກວ່າ ເມື່ອທ່ຽວຈາຣິກໄປໃນແຄວ້ນມະຄົດໂດຍລໍາດັບ ໄດ້ໄປເຖິງເຂດອຸຣຸເວລາເສນານິຄົມ ໄດ້ເຫັນພູມປະເທດທີ່ໜ້າອອນຊອນມີແຄມປ່າໜ້າເພີດເພີນໃຈ ມີແມ່ນໍ້າໄຫຼລິນບໍ່ຂາດສາຍ ມີທ່ານໍ້າສະອາດດີ ໜ້າອອນຊອນ ມີໂຄຈອນຄາມຢູ່ໂດຍຮອບ ເຮົາຈຶ່ງຄິດວ່າ “ພູມປະເທດເປັນທີ່ໜ້າອອນຊອນ ມີແຄມປ່າໜ້າເພີດເພີນໃຈ ມີແມ່ນໍ້າໄຫຼລິນບໍ່ຂາດສາຍ ມີທ່ານໍ້າສະອາດດີ ໜ້າອອນຊອນ ມີໂຄຈອນຄາມຢູ່ໂດຍຮອບ ເໝາະແກ່ການພໍ່າເພັງພຽນຂອງກຸນລະບຸດຜູ້ປາຖະໜາຈະພໍ່າເພັງພຽນ” ເຮົາຈຶ່ງນັ່ງ ໃນບ່ອນນັ້ນດ້ວຍຄິດວ່າ “ທີ່ນີ້ເໝາະແກ່ການພໍ່າເພັງພຽນ”

## ອຸປະມາ ໓ ຂໍ້

ພາຣະທະວາຊະ ຄັ້ງນັ້ນ ອຸປະມາ ໓ ຂໍ້ ອັນໜ້າອັດສະຈັນຢ່າງຍິ່ງ ເຊິ່ງເຮົາຍັງບໍ່ເຄີຍໄດ້ຍິນມາກ່ອນ ໄດ້ຜາກົດແກ່ເຮົາ ຄື

໑. ປຽບຄືໄມ້ສົດມີຢາງທີ່ແຊ່ຢູ່ໃນນ້ຳ ບຸຣຸດນຳໄມ້ນັ້ນມາເຮັດໄມ້ສີໄຟ ດ້ວຍຫວັງວ່າ "ເຮົາຈັກກໍ່ໄຟໃຫ້ເກີດຄວາມຮ້ອນຂຶ້ນ"

ພາຣະຫະວາຊະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸຣຸດນັ້ນນຳໄມ້ສົດທີ່ມີຢາງເຊິ່ງແຊ່ຢູ່ໃນນ້ຳມາເຮັດໄມ້ສີໄຟແລ້ວສີໃຫ້ເປັນໄຟເກີດຄວາມຮ້ອນຂຶ້ນໄດ້ບໍ່?"

"ບໍ່ໄດ້ ຂ້ານ້ອຍ"

"ຂໍ້ນັ້ນຍ້ອນເຫດໃດ"

"ຂ້າແດ່ພຣະອົງຜູ້ຈະເລີນ ຍ້ອນໄມ້ສົດນັ້ນມີຢາງ ທັງຍັງແຊ່ຢູ່ໃນນ້ຳ ບຸຣຸດນັ້ນກໍມີແຕ່ຄວາມເມື່ອຍລ່າລຳບາກເປົ່າ"

"ພາຣະຫະວາຊະ ແນວນັ້ນຄືກັນ ສະມະໜະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ມີກາຍແລະຈິດຍັງບໍ່ຫລີກອອກຈາກກາມ ຍັງມີຄວາມພໍໃຈ ຄວາມຮັກແພງ ຄວາມຫລົງ ຄວາມຢາກແລະຄວາມກະວົນກະວາຍໃນກາມທັງຫລາຍ ຍັງບໍ່ໄດ້ລະແລະບໍ່ໄດ້ລະງັບ ແນວຄົບຖ້ວນໃນພາຍໃນ ສະມະໜະຫຼືພາມຜູ້ຈະເລີນເຫຼົ່ານັ້ນແມ່ນສະເຫວີຍທຸກຂະເວທະນາທີ່ກ້າແຂງ ຫຍາບ ເຜັດຮ້ອນເຊິ່ງເກີດຂຶ້ນຍ້ອນຄວາມພຽນ ກໍເປັນຜູ້ບໍ່ຄວນແກ່ການຮູ້ ການເຫັນ ແລະການຕັດສະຣູ້ອັນປະເສີດ ແມ່ນບໍ່ໄດ້ສະເຫວີຍທຸກຂະເວທະນາທີ່ກ້າແຂງ ຫຍາບ ເຜັດຮ້ອນ ເຊິ່ງເກີດຂຶ້ນຍ້ອນຄວາມພຽນ ກໍເປັນຜູ້ບໍ່ຄວນແກ່ການຮູ້ ການເຫັນ ແລະການ ຕັດສະຣູ້ອັນປະເສີດ

ນີ້ເປັນອຸປະມາຂໍ້ທີ່ ໑ ອັນໜ້າອັດສະຈັນຢ່າງຍິ່ງ ເຊິ່ງເຮົາຍັງບໍ່ເຄີຍໄດ້ຍິນມາກ່ອນ ໄດ້ຜາກົດແກ່ເຮົາ

[໔໗໘] ໒. ປຽບຄືໄມ້ສົດມີຢາງທີ່ວາງຢູ່ເທິງບົກຫ່າງຈາກນ້ຳ ບຸຣຸດນຳໄມ້ນັ້ນມາເຮັດໄມ້ສີໄຟດ້ວຍຫວັງວ່າ "ເຮົາຈັກກໍ່ໄຟໃຫ້ເກີດຄວາມຮ້ອນຂຶ້ນ"

ພາຣະຫະວາຊະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸຣຸດນັ້ນນຳໄມ້ສົດທີ່ມີຢາງເຊິ່ງວາງຢູ່ ເທິງບົກຫ່າງຈາກນ້ຳມາເຮັດເປັນໄມ້ສີໄຟ ແລ້ວສີໃຫ້ເປັນໄຟເກີດຄວາມຮ້ອນຂຶ້ນໄດ້ບໍ່"

"ບໍ່ໄດ້ ຂ້ານ້ອຍ"

"ຂໍ້ນັ້ນຍ້ອນເຫດໃດ?"

"ຂ້າແດ່ພຣະອົງຜູ້ຈະເລີນ ຍ້ອນໄມ້ຍັງສົດແລະມີຢາງ ແມ່ນຈະວາງຢູ່ເທິງບົກຫ່າງຈາກນ້ຳ ບຸຣຸດນັ້ນກໍມີແຕ່ຄວາມເມື່ອຍລ່າລຳບາກເປົ່າ"

"ພາຣະທະວາຊະ ແນວນັ້ນຄືກັນ ສະມະໜະຫຼືພາມເຫຼົ່າໃດເຫຼົ່າໜຶ່ງແມ່ນ ມີກາຍແລະຈິດຫລີກອອກຈາກກາມແລ້ວ ແຕ່ຍັງມີຄວາມພໍໃຈ ຄວາມຮັກແພງ ຄວາມຫລົງ ຄວາມຢາກ ແລະຄວາມກະວົນກະວາຍໃນກາມທັງຫລາຍ ຍັງບໍ່ໄດ້ລະແລະບໍ່ໄດ້ລະງັບແນວເດັດຂາດໃນພາຍໃນ ສະມະໜະຫຼືພາມຜູ້ຈະເລີນເຫຼົ່ານັ້ນແມ່ນສະເຫວີຍທຸກຂະເວທະນາທີ່ກ້າແຂງ ທຍາບ ເຜັດຮ້ອນ ເຊິ່ງເກີດຂຶ້ນຍ້ອນຄວາມພຽນ ກໍເປັນຜູ້ບໍ່ຄວນແກ່ການຮູ້ ການເຫັນ ແລະການຕັດສະຣູ້ອັນປະເສີດ ແມ່ນບໍ່ໄດ້ສະເຫວີຍທຸກຂະເວທະນາທີ່ກ້າແຂງ ທຍາບ ເຜັດຮ້ອນ ເຊິ່ງເກີດຂຶ້ນຍ້ອນຄວາມພຽນ ກໍເປັນຜູ້ບໍ່ຄວນແກ່ການຮູ້ ການເຫັນ ແລະການ ຕັດສະຣູ້ອັນປະເສີດ

ນີ້ເປັນອຸປະມາຂໍ້ທີ່ ໘ ອັນໜ້າອັດສະຈັນຢ່າງຍິ່ງ ເຊິ່ງເຮົາຍັງບໍ່ເຄີຍໄດ້ຍິນມາກ່ອນ ໄດ້ຜາກົດແກ່ເຮົາ

[໕໗໙] ໓. ປຽບຄືໄມ້ທີ່ແຫ້ງສະນິດເຊິ່ງວາງຢູ່ເທິງບົກຫ່າງຈາກນໍ້າ ບຸຣຸດນໍາມາເຮັດເປັນໄມ້ສີໄຟ ດ້ວຍຫວັງວ່າ "ເຮົາຈັກກໍ່ໄຟໃຫ້ເກີດຄວາມຮ້ອນຂຶ້ນ"

ພາຣະທະວາຊະ ທ່ານເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸຣຸດນັ້ນນໍາໄມ້ທີ່ແຫ້ງສະນິດເຊິ່ງວາງຢູ່ ເທິງບົກຫ່າງຈາກນໍ້າມາເຮັດເປັນໄມ້ສີໄຟ ແລ້ວສີໃຫ້ເປັນໄຟເກີດຄວາມຮ້ອນຂຶ້ນໄດ້ບໍ?"

"ໄດ້ ຂ້ານ້ອຍ"

"ຂໍ້ນັ້ນຍ້ອນເຫດໃດ?"

"ຂ້າແດ່ພຣະອົງຜູ້ຈະເລີນ ຍ້ອນໄມ້ແຫ້ງສະນິດ ທັງວາງຢູ່ເທິງບົກຫ່າງຈາກນໍ້າ"

"ພາຣະທະວາຊະ ແນວນັ້ນຄືກັນ ສະມະໜະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ມີກາຍ ແລະຈິດຫລີກອອກຈາກກາມແລ້ວ ທັງລະແລະລະງັບຄວາມພໍໃຈ ຄວາມຮັກແພງ ຄວາມຫລົງ ຄວາມຢາກ ແລະຄວາມກະວົນກະວາຍໃນກາມທັງຫລາຍໄດ້ຢ່າງເດັດຂາດໃນພາຍໃນແລ້ວ ສະມະໜະຫຼືພາມຜູ້ຈະເລີນເຫຼົ່ານັ້ນ ແມ່ນສະເຫວີຍທຸກຂະເວທະນາທີ່ກ້າແຂງ ທຍາບ ເຜັດຮ້ອນ ເຊິ່ງເກີດຂຶ້ນຍ້ອນຄວາມພຽນ ກໍເປັນຜູ້ຄວນແກ່ການຮູ້ ການເຫັນ ແລະການຕັດສະຣູ້ອັນປະເສີດ ແມ່ນບໍ່ໄດ້ສະເຫວີຍທຸກຂະເວທະນາທີ່ກ້າແຂງ ທຍາບ ເຜັດຮ້ອນ ເຊິ່ງເກີດຂຶ້ນຍ້ອນຄວາມພຽນ ກໍເປັນຜູ້ຄວນແກ່ການຮູ້ ການເຫັນ ແລະການຕັດສະຣູ້ອັນປະເສີດ

ນີ້ເປັນອຸປະມາຂໍ້ທີ່ ໓ ອັນໜ້າອັດສະຈັນຢ່າງຍິ່ງ ເຊິ່ງເຮົາຍັງບໍ່ເຄີຍໄດ້ຍິນມາກ່ອນ ໄດ້ຜາກົດແກ່ເຮົາ

ພາຣະທະວາຊະ ນີ້ຄື ອຸປະມາທັງ ໓ ຂໍ້ອັນໜ້າອັດສະຈັນຢ່າງຍິ່ງເຊິ່ງເຮົາຍັງບໍ່ເຄີຍໄດ້ຍິນມາກ່ອນນີ້ແລ ໄດ້ຜາກົດແກ່ເຮົາ

## ຊົງພໍ່າເພັງທຸກກະຣະກິຣິຍາ

[໔໗໐] ພາຣະທະວາຊະ ເຮົານັ້ນມີຄວາມດໍາຣິວ່າ "ທາງທີ່ດີ ເຮົາຄວນກັດເນັ້ນແຂ້ວ ໃຊ້ລີ້ນດັນເພດານໄວ້ແໜ້ນ ໃຊ້ຈິດຂົ່ມຄັ້ນຈິດ ເຮັດຈິດໃຫ້ຮ້ອນຮົນ" ເຮົານັ້ນກໍກັດເນັ້ນແຂ້ວ ໃຊ້ລີ້ນດັນເພດານໄວ້ແໜ້ນ ໃຊ້ຈິດຂົ່ມຄັ້ນຈິດ ເຮັດຈິດໃຫ້ຮ້ອນຮົນ ເມື່ອເຮົາເຮັດດັ່ງນັ້ນ ເຫື່ອກໍໄຫຼອອກຈາກຂີ້ແຮ້ທັງ ໔ ຂ້າງ ຄົນທີ່ແຂງແຮງຈັບຄົນທີ່ອ່ອນແອກວ່າທີ່ຫົວຫຼືທີ່ຄໍ ແລ້ວບີບຄັ້ນຮັດໄວ້ໃຫ້ແໜ້ນ ແມ່ນສັນໃດ ເຮົາກໍສັນນັ້ນຄືກັນ ເມື່ອກັດເນັ້ນແຂ້ວ ໃຊ້ລີ້ນດັນເພດານໄວ້ແໜ້ນ ໃຊ້ຈິດຂົ່ມຄັ້ນຈິດ ເຮັດຈິດໃຫ້ຮ້ອນຮົນ ເຫື່ອກໍໄຫຼອອກຈາກຂີ້ແຮ້ທັງ ໔ ຂ້າງ

ເຮົາຜາຣົບຄວາມພຽນບໍ່ທໍ້ຖອຍ ມີສະຕິຕັ້ງໝັ້ນ ບໍ່ຟັ່ນເຟືອນ ແຕ່ເມື່ອເຮົາຖືກຄວາມພຽນທີ່ທົນໄດ້ຍາກນັ້ນສຽດແທງຢູ່ ກາຍຂອງເຮົາກໍກະວົນກະວາຍ ບໍ່ສະງົບລະງັບ

[໔໗໑] ພາຣະທະວາຊະ ເຮົາຈຶ່ງມີຄວາມດໍາຣິວ່າ "ທາງທີ່ດີ ເຮົາຄວນພໍ່າເພັງຊານ ອັນບໍ່ມີລົມຫາຍໃຈສິ້ນສຸດເທື່ອ" ເຮົາກໍກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກທັງທາງປາກແລະ ທາງດັງ ເມື່ອເຮົາກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກແລະທາງດັງ ລົມກໍອອກທາງຫູທັງ ໔ ຂ້າງ ມີສຽງດັງອູ້ ໆ ລົມທີ່ຊ່າງຄໍາສູບຢູ່ມີສຽງດັງອູ້ ໆ ແມ່ນສັນໃດ ເມື່ອເຮົາກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກແລະທາງດັງ ລົມກໍອອກທາງຫູທັງ ໔ ຂ້າງ ມີສຽງດັງອູ້ ໆ ກໍສັນນັ້ນຄືກັນ

ເຮົາຜາຣົບຄວາມພຽນບໍ່ທໍ້ຖອຍ ມີສະຕິຕັ້ງໝັ້ນ ບໍ່ຟັ່ນເຟືອນ ແຕ່ເມື່ອເຮົາຖືກຄວາມພຽນທີ່ທົນໄດ້ຍາກນັ້ນສຽດແທງຢູ່ ກາຍຂອງເຮົາກໍກະວົນກະວາຍ ບໍ່ສະງົບລະງັບ ເຮົາຈຶ່ງມີຄວາມດໍາຣິວ່າ "ທາງທີ່ດີ ເຮົາຄວນພໍ່າເພັງຊານອັນບໍ່ມີລົມຫາຍໃຈສິ້ນສຸດເທື່ອ" ເຮົາກໍ ກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງຮູຫູ ເມື່ອເຮົາກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງຮູຫູ ລົມອັນ ແຮງກ້າກໍສຽດແທງຫົວ ຄົນທີ່ແຂງແຮງໃຊ້ເຫລັກທີ່ແຫລມຄົມແທງຫົວ ແມ່ນສັນໃດ ເມື່ອເຮົາກັ້ນລົມຫາຍໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກແລະທາງດັງແລະທາງຮູຫູ ລົມອັນແຮງກ້າກໍສຽດແທງສຣີສະ ສັນນັ້ນຄືກັນ

ເຮົາຜາຣົບຄວາມພຽນບໍ່ທໍ້ຖອຍ ມີສະຕິຕັ້ງໝັ້ນ ບໍ່ຟັ່ນເຟືອນ ແຕ່ເມື່ອເຮົາຖືກຄວາມພຽນທີ່ທົນໄດ້ຍາກນັ້ນສຽດແທງຢູ່ ກາຍຂອງເຮົາກໍກະວົນກະວາຍ ບໍ່ສະງົບລະງັບ

ເຮົາຈຶ່ງມີຄວາມດໍາຣິວ່າ "ທາງທີ່ດີ ເຮົາຄວນພໍ່າເພັງຊານອັນບໍ່ມີລົມຫາຍໃຈສິ້ນສຸດເທື່ອ" ເຮົາກໍກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງຮູຫູ ເມື່ອເຮົາກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງຮູຫູ ກໍມີທຸກຂະເວທະນາໃນຫົວ

ເປັນຈຳນວນຫລາຍ ຄົນທີ່ແຂງແຮງໃຊ້ເຊືອກໜັງທີ່ໜຽວຂັນຫົວ ແມ່ນສັນໃດ ເມື່ອເຮົາກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງ ຮູຫູ ກໍມີເວທະນາໃນຫົວແນວແຮງກ້າ ສັນນັ້ນຄືກັນ

ເຮົາຜາຣົບຄວາມພຽນບໍ່ທໍ່ອນຍານ ມີສະຕິຕັ້ງໝັ້ນ ບໍ່ຟັ່ນເຟືອນ ແຕ່ເມື່ອເຮົາຖືກຄວາມພຽນທີ່ທົນໄດ້ຍາກນັ້ນສຽດແທງຢູ່ ກາຍຂອງເຮົາກໍກະວົນກະວາຍ ບໍ່ສະງົບລະງັບ

ເຮົາຈຶ່ງມີຄວາມດຳຣິວ່າ "ທາງທີ່ດີ ເຮົາຄວນພໍ່າເພັງຊານອັນບໍ່ມີລົມຫາຍໃຈສິ້ນສຸດເທີ້ນ" ເຮົາກໍກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງຮູຫູ ເມື່ອເຮົາກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງຮູຫູ ລົມອັນແຮງກ້າກໍບາດໃນບໍລິເວນທ້ອງ ຄົນຂ້າງົວຫຼືລູກມືຂອງຄົນຂ້າງົວຜູ້ຊ່ຽວຊານ ໃຊ້ມີດແລ່ເນື້ອທີ່ຄົມຂີດທ້ອງ ແມ່ນສັນໃດ ເມື່ອເຮົາກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງຮູຫູ ກໍມີລົມອັນແຮງກ້າບາດໃນບໍລິເວນທ້ອງ ສັນນັ້ນຄືກັນ

ເຮົາຜາຣົບຄວາມພຽນບໍ່ທໍ່ອນຍານ ມີສະຕິຕັ້ງໝັ້ນ ບໍ່ຟັ່ນເຟືອນ ແຕ່ເມື່ອເຮົາຖືກຄວາມພຽນທີ່ທົນໄດ້ຍາກນັ້ນສຽດແທງຢູ່ ກາຍຂອງເຮົາກໍກະວົນກະວາຍ ບໍ່ສະງົບລະງັບ

ເຮົາຈຶ່ງມີຄວາມດຳຣິວ່າ "ທາງທີ່ດີ ເຮົາຄວນພໍ່າເພັງຊານອັນບໍ່ມີລົມຫາຍໃຈສິ້ນສຸດເທີ້ນ ເຮົາກໍກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງຮູຫູ ເມື່ອເຮົາກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງຮູຫູ ກໍມີຄວາມກະວົນກະວາຍໃນຮ່າງກາຍແນວແຮງກ້າ ຄົນທີ່ແຂງແຮງ ໒ ຄົນຈັບແຂນຄົນທີ່ອ່ອນແອກວ່າຄົນລະຂ້າງກ້າວໃຫ້ຮ້ອນ ເທິງຂຸມຖ່ານໄຟ ແມ່ນສັນໃດ ເມື່ອເຮົາກັ້ນລົມຫັນໃຈເຂົ້າແລະລົມຫັນໃຈອອກ ທັງທາງປາກທາງດັງແລະທາງຮູຫູ ກໍມີຄວາມກະວົນກະວາຍໃນຮ່າງກາຍແນວແຮງກ້າ ສັນນັ້ນຄືກັນ

ເຮົາຜາຣົບຄວາມພຽນບໍ່ທໍ່ອນຍານ ມີສະຕິຕັ້ງໝັ້ນ ບໍ່ຟັ່ນເຟືອນ ແຕ່ເມື່ອເຮົາຖືກຄວາມພຽນທີ່ທົນໄດ້ຍາກນັ້ນສຽດແທງຢູ່ ກາຍຂອງເຮົາກໍກະວົນກະວາຍ ບໍ່ສະງົບລະງັບ

ເທວະດາທັງຫລາຍເຫັນເຮົາແລ້ວກໍພາກັນກ່າວແນວນີ້ວ່າ "ພຣະສະມະນະໂຄດົມສິ້ນພະຊົນແລ້ວ" ລາງພວກກ່າວແນວນີ້ວ່າ "ພຣະສະມະນະໂຄດົມຍັງບໍ່ໄດ້ສິ້ນພະຊົນ ແຕ່ກຳລັງຈະສິ້ນພະຊົນ" ລາງພວກກ່າວແນວນີ້ວ່າ "ພຣະສະມະນະໂຄດົມຍັງບໍ່ສິ້ນພະຊົນ ທັງຈະບໍ່ສິ້ນ ພະຊົນ ພຣະສະມະນະໂຄດົມຈະເປັນພຣະອະຣະຫັນ ການຢູ່ແນວນີ້ນັ້ນ ເປັນວິຫານທຳ໑ຂອງທ່ານຜູ້ເປັນພຣະອະຣະຫັນ"

ເຮົາຈຶ່ງມີຄວາມດຳຣິວ່າ "ທາງທີ່ດີ ເຮົາຄວນປະຕິບັດດ້ວຍການອົດອາຫານທຸກແນວ"

ຂະນະນັ້ນ ເທວະດາທັງຫລາຍເຂົ້າມາຫາເຮົາແລ້ວກ່າວວ່າ "ຂ້າແດ່ທ່ານຜູ້ນິຣະທຸກ ທ່ານຢ່າໄດ້ປະຕິບັດດ້ວຍການອົດອາຫານທຸກແບບ ຖ້າທ່ານຈັກປະຕິບັດດ້ວຍການອົດອາຫານທຸກແບບ ພວກຂ້າພະເຈົ້າຈະແຊກໂອຊາອັນເປັນທິບເຂົ້າທາງຂຸມຂົນຂອງທ່ານ ທ່ານຈະໄດ້ຍັງອັດພາບໃຫ້ເປັນໄປດ້ວຍໂອຊານັ້ນ" ເຮົາຈຶ່ງມີຄວາມດຳຣິວ່າ "ເຮົາປະຕິຍານວ່າ ຈະຕ້ອງອົດອາຫານ ທຸກແບບ ແຕ່ເທວະດາເຫລົ່ານີ້ຈະແຊກໂອຊາອັນເປັນທິບເຂົ້າທາງຂຸມຂົນຂອງເຮົາ ເຮົາຈະຍັງອັດພາບໃຫ້ເປັນໄປດ້ວຍໂອຊານັ້ນ ການປະຕິຍານນັ້ນກໍຈະເພິ່ງເປັນມຸສາແກ່ເຮົາເອງ" ເຮົາຈຶ່ງກ່າວຫ້າມເທວະດາເຫຼົ່ານັ້ນວ່າ "ຢ່າເລີຍ"

ເຮົາຈຶ່ງມີຄວາມດຳຣິວ່າ "ທາງທີ່ດີ ເຮົາຄວນກິນອາຫານໃຫ້ໜ້ອຍລົງ ໆ ພຽງຄັ້ງລະ ໑ ຟາຍມືແດ່ ທໍ່ເຍື່ອໃນເມັດຖົ່ວຂຽວແດ່ ທໍ່ເຍື່ອໃນເມັດຖົ່ວພູແດ່ ທໍ່ເຍື່ອໃນເມັດຖົ່ວດຳແດ່ ທໍ່ເຍື່ອໃນເມັດບົວແດ່, ເຮົາຈຶ່ງກິນອາຫານໜ້ອຍລົງ ໆ ພຽງຄັ້ງລະ ໑ ຟາຍມືແດ່ ທໍ່ເຍື່ອໃນເມັດຖົ່ວຂຽວແດ່ ທໍ່ເຍື່ອໃນເມັດຖົ່ວພູແດ່ ທໍ່ເຍື່ອໃນ ເມັດຖົ່ວດຳແດ່ ທໍ່ເຍື່ອໃນເມັດບົວແດ່" ເມື່ອເຮົາກິນອາຫານໜ້ອຍລົງ ໆ ພຽງຄັ້ງລະ ໑ ຟາຍມືແດ່ ທໍ່ເຍື່ອໃນເມັດຖົ່ວຂຽວແດ່ ທໍ່ເຍື່ອໃນເມັດຖົ່ວພູແດ່ ທໍ່ເຍື່ອໃນເມັດຖົ່ວດຳແດ່ ທໍ່ເຍື່ອໃນເມັດບົວແດ່ ກາຍຈຶ່ງຈ່ອຍແຫ້ງຫຼາຍ ອະໄວຍະວະນ້ອຍໃຫຍ່ ຂອງເຮົາຈຶ່ງເປັນຄືເຄືອເຂົາທີ່ມີຂໍ້ຫຼາຍຫຼືເຄືອເຂົາທີ່ມີຂໍ້ດຳ ຊີ້ນສະໂພກກໍລີບ ຄືກີບຕີນອູດ ກະດູກສັນຫລັງກໍຜຸດເປັນໜາມຄືເຄືອເຂົາ ຊີ່ໂຄງທັງ ໔ ຂ້າງ ຂຶ້ນສະພັ່ງ ຄືກອນສາລາເກົ່າ ດວງຕາທັງ ໔ ກໍເລິກເຂົ້າໄປໃນເບົ້າຕາ ຄື ດວງດາວຜາກົດຢູ່ໃນນ້ຳສ້າງເລິກ ໜັງເທິງຫົວກໍຫ່ຽວຫົດຄືລູກນ້ຳເຕົ້າທີ່ເຂົາຕັດມາຂະນະຍັງດິບຕ້ອງລົມແລະແດດເຂົ້າກໍຫ່ຽວຫົດໄປ ຍ້ອນເປັນຜູ້ມີອາຫານໜ້ອຍນັ້ນ ເຮົາຄິດວ່າ "ຈະລູບພື້ນທ້ອງ" ກໍຈັບເຖິງກະດູກສັນຫລັງ ຄິດວ່າ "ຈະລູບກະດູກສັນຫລັງ" ກໍຈັບເຖິງ ພື້ນທ້ອງ ຍ້ອນພື້ນທ້ອງຂອງເຮົາແນບຕິດຈົນເຖິງກະດູກສັນຫລັງ ເຮົາຄິດວ່າ "ຈະຖ່າຍອຸດຈາຣະ ຫຼືຖ່າຍປັດສາວະ" ກໍຊວນເຊລົ້ມລົງ ໃນບ່ອນນັ້ນ ເມື່ອຈະໃຫ້ກາຍສະບາຍແດ່ ຈຶ່ງໃຊ້ຝາມື ລູບໂຕ ຂົນທັງຫລາຍທີ່ມີຮາກເນົ່າກໍລຸດຮ່ວງຈາກກາຍ ຍ້ອນເປັນຜູ້ມີອາຫານໜ້ອຍ ມະນຸດທັງຫລາຍເຫັນເຮົາເຂົ້າແລ້ວ ກໍກ່າວແນວນີ້ວ່າ "ພຣະສະມະນະໂຄດົມດຳໄປ" ລາງພວກກໍກ່າວແນວນີ້ວ່າ "ພຣະສະມະນະໂຄດົມບໍ່ດຳພຽງແຕ່ແຫຼ້ໄປ" ລາງພວກກໍກ່າວແນວນີ້ວ່າ "ບໍ່ດຳ ບໍ່ແຫຼ້ ພຽງແຕ່ກະດ່າງກະດາວໄປ" ເຮົາມີຜິວພັນບໍລິສຸດ ພຸດຜ່ອງ ພຽງແຕ່ເສຍຜິວໄປ ຍ້ອນເປັນຜູ້ມີອາຫານໜ້ອຍທໍ່ນັ້ນ

[໔໗໔] ພາຣະທະວາຊະ ເຮົານັ້ນຈຶ່ງມີຄວາມດຳຣິວ່າ "ສະມະໜະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະດີດ ທີ່ສະເຫວີຍທຸກຂະເວທະນາກ້າແຂງ ຫຍາບ ເຜັດຮ້ອນ ທີ່ເກີດຂຶ້ນຍ້ອນ ຄວາມພຽນ ທຸກຂະເວທະນານັ້ນຢ່າງຍິ່ງກໍພຽງທໍ່ນີ້ບໍ່ເກີນກວ່ານີ້ໄປ ສະມະໜະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຜູ້ສະເຫວີຍທຸກຂະເວທະນາ ກ້າແຂງ ຫຍາບ ເຜັດຮ້ອນ ທີ່ເກີດຂຶ້ນຍ້ອນຄວາມພຽນ ທຸກຂະເວທະນານັ້ນຢ່າງຍິ່ງກໍພຽງທໍ່ນີ້ບໍ່ເກີນກວ່ານີ້ໄປ ສະມະໜະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນ

ປັດຈຸບັນສະເຫວີຍທຸກຂະເວທະນາກ້າແຂງ ຫຍາບ ເຜັດຮ້ອນ ທີ່ເກີດຂຶ້ນຍ້ອນຄວາມພຽນ ທຸກ ຂະເວທະນານັ້ນຢ່າງຍິ່ງກໍພຽງນີ້ບໍ່ເກີນກວ່ານີ້ໄປ ແຕ່ເຮົາກໍຍັງບໍ່ໄດ້ບັນລຸຍານທັດສະນະທີ່ປະເສີດ ອັນສາມາດວິເສດຍິ່ງກວ່າທຳຂອງມະນຸດ ດ້ວຍ ທຸກກອນກິຣິຍາອັນເຜັດຮ້ອນນີ້ ຈະເພິ່ງມີທາງ ອື່ນທີ່ຈະຕັດສະຣູ້ແດ່ບໍ

ເຮົາຈຶ່ງມີຄວາມດຳຣິວ່າ "ເຮົາຈື່ໄດ້ຢູ່ ເມື່ອເວລາງານຂອງທ້າວຈັກກາທິບໍດີເຊິ່ງເປັນ ພຣະຣາຊະບິດາ ເຮົານັ່ງຢູ່ໃຕ້ຕົ້ນຫວ້າອັນຮົ່ມເຢັນ ໄດ້ສະຫງັດຈາກກາມແລະອະກຸສົນທຳ ທັງຫລາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ ທາງນັ້ນ ເພິ່ງເປັນທາງແຫ່ງການຕັດສະຣູ້ຫຼືໜໍ" ເຮົາມີຄວາມຮູ້ແຈ້ງທີ່ຕາມຣະນຶກດ້ວຍສະຕິວ່າ "ທາງນັ້ນ ເປັນທາງແຫ່ງການຕັດສະຣູ້" ເຮົາຈຶ່ງມີຄວາມດຳຣິວ່າ "ເຮົາຢ້ານຄວາມສຸກທີ່ເວັ້ນຈາກກາມແລະ ອະກຸສົນທຳທັງຫລາຍບໍ" ເຮົາກໍດຳຣິວ່າ "ເຮົາບໍ່ຢ້ານຄວາມສຸກທີ່ເວັ້ນຈາກກາມແລະ ອະກຸສົນ ທຳທັງຫລາຍເລີຍ"

[໔໗໖] ພາຣະທະວາຊະ ເຮົາຈຶ່ງມີຄວາມດຳຣິຕໍ່ໄປວ່າ "ເຮົາຜູ້ມີກາຍຈ່ອຍແຫ້ງຫຼາຍ ແບວນີ້ ຈະບັນລຸຄວາມສຸກນັ້ນບໍ່ແມ່ນເຮັດໄດ້ງ່າຍເລີຍ ທາງທີ່ດີ ເຮົາຄວນກິນອາຫານຫຍາບ ຄື ເຂົ້າສຸກແລະເຂົ້າໜົມກຸມມາດ" ເຮົາກໍກິນອາຫານຫຍາບຄືເຂົ້າສຸກແລະເຂົ້າໜົມກຸມມາດ ຄັ້ງນັ້ນ ພິກຂຸປັນຈະວັກຄີເຝົ້າບຳລຸງເຮົາ ດ້ວຍຫວັງວ່າ "ພຣະສະມະນະໂຄດົມບັນລຸທຳໃດ ຈັກບອກທຳ ນັ້ນແກ່ເຮົາທັງຫລາຍ" ເມື່ອໃດ ເຮົາສັນອາຫານຫຍາບ ຄືເຂົ້າສຸກແລະເຂົ້າໜົມກຸມມາດ ເມື່ອນັ້ນ ພິກຂຸປັນຈະວັກຄີນັ້ນກໍເບື່ອໜ່າຍ ຈາກໄປດ້ວຍເຂົ້າໃຈວ່າ "ພຣະສະມະນະໂຄດົມ ມັກຫຼາຍ ຄາຍຄວາມພຽນ ວຽນມາເພື່ອຄວາມເປັນຜູ້ມັກຫຼາຍສາແລ້ວ"

## ຊານ ໔ ແລະວິດຊາ ໓

ພາຣະທະວາຊະ ເຮົາສັນອາຫານຫຍາບໃຫ້ຮ່າງກາຍມີກຳລັງ ສະຫງັດຈາກກາມແລະອະ ກຸສົນທຳ ທັງຫລາຍແລ້ວ ບັນລຸປະຖົມຊານ ຯລຯ ຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸ ຕິຍະຊານ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານ ຯລຯ ຢູ່

ເມື່ອຈິດເປັນສະມາທິບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມ ເສົ້າໝ ອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແບວນີ້ ເຮົານັ້ນນ້ອມຈິດ ໄປເພື່ອປຸບ ເພນິວາສານຸດສະຕິຍານ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໔ ຊາດແດ່ ຯລຯ ເຮົາ ຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແບວນີ້ ເຮົາໄດ້ບັນລຸວິ ດຊາທີ່ ໑ ນີ້ ໃນປະຖົມມະຍາມແຫ່ງຣາຕີ ກຳຈັດອະວິດຊາ ໄດ້ແລ້ວ ວິດຊາກໍເກີດຂຶ້ນ ກຳຈັດ ຄວາມມືດໄດ້ແລ້ວ ຄວາມສະຫວ່າງກໍເກີດຂຶ້ນ ຄືບຸກຄົນ ຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍ ແລະໃຈຢູ່

[໔໗໔] ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແບບນີ້ ເຮົານັ້ນ ນ້ອມຈິດໄປເພື່ອຈຸຕູປະປາຕະຍານ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງ ໝູ່ສັດຜູ້ເປັນໄປຕາມກຳ ຯລຯ ເຮົາໄດ້ບັນລຸວິດຊາທີ່ ໒ ນີ້ໃນມັດຊິມະຍາມແຫ່ງຣາຕີ ກຳຈັດອະວິດຊາໄດ້ແລ້ວ ວິດຊາກໍເກີດຂຶ້ນ ກຳຈັດຄວາມມືດໄດ້ແລ້ວ ຄວາມສະຫວ່າງກໍເກີດຂຶ້ນ ຄື ບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່

ເມື່ອຈິດເປັນສະມາທິ ບໍລິສຸດຜຸດຜ່ອງ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ອ່ອນ ເໝາະແກ່ການໃຊ້ງານ ຕັ້ງໝັ້ນ ບໍ່ຫວັ່ນໄຫວແບບນີ້ ເຮົານັ້ນນ້ອມຈິດ ໄປເພື່ອອາສະວັກຂະຍະຍານ ຮູ້ແຈ້ງຕາມຄວາມເປັນຈິງວ່າ "ນີ້ທຸກ ຯລຯ ນີ້ທຸກຂະນິໂຣດຄາມິນີປະຕິປະທາ ນີ້ອາສະວະ ຯລຯ໑ ນີ້ອາສະວະນິໂຣດຄາມິນີປະຕິປະທາ" ເມື່ອເຮົາຮູ້ເຫັນຢູ່ແບບນີ້ ຈິດຍ່ອມລຸດພົ້ນຈາກກາມາສະຫວະ ພະວາດະວະ ແລະອະວິດຊາສະຫວະ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ "ລຸດພົ້ນແລ້ວ" ຮູ້ແຈ້ງວ່າ "ຊາດສິ້ນແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແບບນີ້ອີກຕໍ່ໄປ"

ເຮົາບັນລຸວິດຊາທີ່ ໓ ນີ້ ໃນປັດສິມມະຍາມແຫ່ງຣາຕີ ກຳຈັດອະວິດຊາໄດ້ແລ້ວ ວິດຊາກໍເກີດຂຶ້ນ ກຳຈັດຄວາມມືດແລ້ວ ຄວາມສະຫວ່າງກໍເກີດຂຶ້ນ ຄືບຸກຄົນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່"

[໔໗໕] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແບບນີ້ແລ້ວ ສັງຄາຣະວະມານົບໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຄວາມພຽນອັນບໍ່ທຍ່ອນຍານໄດ້ມີແລ້ວແກ່ທ່ານພຣະໂຄດົມນໍ ຄວາມພຽນຂອງສັດຕະບຸຣຸດໄດ້ມີແລ້ວແກ່ທ່ານພຣະໂຄດົມນໍ ທ່ານພຣະໂຄດົມສົມຄວນເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ທ່ານພຣະໂຄດົມ ເທວະດາມີຢູ່ຫຼືບໍ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາຣະທະວາຊະ ຂໍ້ທີ່ວ່າເທວະດາມີນັ້ນ ຮູ້ໄດ້ໂດຍຖານະ"

ສັງຄາຣະວະມານົບຂາບທູລວ່າ "ທ່ານພຣະໂຄດົມ ເມື່ອຂ້າພຣະອົງທູນຖາມວ່າ "ເທວະດາ ມີຫຼືໜໍ" ພຣະອົງກໍຕັດຕອບວ່າ "ພາຣະທະວາຊະ ຂໍ້ທີ່ວ່າເທວະດາມີນັ້ນ ຮູ້ໄດ້ໂດຍຖານະ" ເມື່ອເປັນແບບນີ້ ຄຳເວົ້າຂອງພຣະອົງເປັນຄຳເວົ້າເປົ່າ ເປັນມຸສາບໍ່ແມ່ນບໍ?"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາຣະທະວາຊະ ຜູ້ໃດເມື່ອຖືກຖາມວ່າ "ເທວະດາມີຢູ່ບໍ" ຈະເພິ່ງຕອບວ່າ "ຂໍ້ທີ່ວ່າເທວະດາມີຢູ່ນັ້ນ ຮູ້ກັນໄດ້ໂດຍຖານະ" ຜູ້ນັ້ນກໍທໍ່ກັບກ່າວວ່າ "ເຮົາຮູ້ຈັກ

ເທວະດາ" ເມື່ອເປັນເຊັ່ນນັ້ນ ທ່ານຜູ້ຮູ້ກໍເຂົ້າໃຈໃນເລື້ອງນີ້ໄດ້ວ່າ "ເທວະດາມີຢູ່" ໂດຍແນ່ແທ້"

ສັງຄາຣະວະມານົບທູນຖາມວ່າ "ເປັນຫຍັງ ທ່ານພຣະໂຄດົມຈຶ່ງບໍ່ຊົງຕອບແກ່ຂ້າພຣະອົງເສຍແຕ່ທຳອິດນໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາຣະທະວາຊະ ຂໍ້ທີ່ວ່າເທວະດາມີຢູ່ນັ້ນ ເຂົາສົມມຸດກັນໃນໂລກ ດ້ວຍຄຳສັບທີ່ສູງ"

## ສັງຄາຣະວະມານົບສະແດງຕົນເປັນອຸປາສົກ

[໔໗໖] ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ສັງຄາຣະວະມານົບໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະອົງຊົງປະກາດທຳແຈ້ງຊັດໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ່ຳ ໄຂຂອງທີ່ອັດ ບອກທາງແກ່ຄົນຫລົງທາງ ຫຼືເຍືອງໄຟໃນບ່ອນມືດ ດ້ວຍຕັ້ງໃຈວ່າ "ຄົນມີຕາດີຈັກເຫັນ ຮູບໄດ້" ຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ຈົນຕະຫຼອດຊີວິດ" ດັ່ງນີ້ແລ

**ສັງຄາຣະວະສູດທີ ໑໐ ຈົບ**

**ພາມມະນະວັກທີ່ ໕ ຈົບ**

## ລວມພຣະສູດ ທີ່ມາໃນວັກນີ້ ຄື

| | |
|---|---|
| ໑. ພຣົມມາຍຸສູດ | ໒. ເສລະສູດ |
| ໓. ອັດສະລາຍະນະສູດ | ໔. ໂຄຕະມຸຂະສູດ |
| ໕. ຈັງກີສູດ | ໖. ເອສຸກາຣີສູດ |
| ໗. ທະນັນຊານີສູດ | ໘. ວາເສດຖະສູດ |
| ໙. ສຸພະສູດ | ໑໐. ສັງຄາຣະວະສູດ |

## ລວມວັກທີ່ມີໃນມັດຊິມະນິກາຍ ມັດຊິມະປັນນາດນີ້ມີ ໕ ວັກ ຄື

໑. ຄະຫະປະຕິວັກ
໒. ປະຣິບພາຊະກະວັກ
໓. ພາມມະນະວັກ
໔. ພິກຂຸວັກ
໕. ຣາຊະວັກ

### ມັດຊິມະປັນນາດ ຈົບບໍລິບູນ